ສກ. ແມ່ນ

ປຣ. ຈັກຂາຍະຕະນະເປັນບຸກຄົນ ຯລຯ ບຸກຄົນອາໄສຈັກຂາຍະຕະນະ ຯລຯ ບຸກຄົນເປັນອື່ນຈາກຈັກຂາຍະຕະນະ ຯລຯ ຈັກຂາຍະຕະນະອາໄສບຸກຄົນ ຯລຯ ທຳມາຍະຕະນະເປັນບຸກຄົນ ຯລຯ ບຸກຄົນອາໄສທຳມາຍະຕະນະ ຯລຯ ບຸກຄົນເປັນອື່ນຈາກທຳມາຍະຕະນະ ຯລຯ ທຳມາຍະຕະນະອາໄສບຸກຄົນ ຯລຯ ຈັກຂຸທາດເປັນບຸກຄົນ ຯລຯ ບຸກຄົນອາໄສຈັກຂຸທາດ ຯລຯ ບຸກຄົນເປັນອື່ນຈາກຈັກຂຸທາດ ຯລຯ ຈັກຂຸທາດອາໄສບຸກຄົນ ຯລຯ ທຳມະທາດເປັນບຸກຄົນ ຯລຯ ບຸກຄົນອາໄສທຳມະທາດ ຯລຯ ບຸກຄົນເປັນອື່ນຈາກທຳມະທາດ ຯລຯ ທຳມະທາດອາໄສບຸກຄົນ ຯລຯ ຈັກຂຸນຊິເປັນບຸກຄົນ ຯລຯ ບຸກຄົນອາໄສຈັກຂຸນຊິ ຯລຯ ບຸກຄົນເປັນອື່ນຈາກຈັກຂຸນຊິ ຯລຯ ຈັກຂຸນຊິອາໄສບຸກຄົນ ຯລຯ ອັນຍາຕາວິນຊິເປັນບຸກຄົນ ຯລຯ ບຸກຄົນອາໄສອັນຍາຕາວິນຊິ ຯລຯ ບຸກຄົນເປັນອື່ນຈາກອັນຍາຕາວິນຊິ ຯລຯ ອັນຍາຕາວິນຊິອາໄສບຸກຄົນ ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ

ປຣ. ທ່ານຈົ່ງຮັບປະຕິກຳ ດັ່ງຕໍ່ໄປນີ້

ຫາກພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງມີຢູ່" ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ອັນຍາຕາວິນຊິອາໄສບຸກຄົນ" ທ່ານກ່າວຄຳຂັດແຍ່ງໃດໃນຕອນຕົ້ນນັ້ນວ່າ "ຂ້າພະເຈົ້າຍອມຮັບວ່າ ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງມີຢູ່" ແຕ່ບໍ່ຍອມຮັບວ່າ ອັນຍາຕາວິນຊິອາໄສບຸກຄົນ" ຄຳນັ້ນຂອງທ່ານຜິດ

ອັນໜຶ່ງ ຫາກທ່ານບໍ່ຍອມຮັບວ່າ "ອັນຍາຕາວິນຊິອາໄສບຸກຄົນ" ທ່ານກໍບໍ່ຄວນຍອມຮັບວ່າ "ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງມີຢູ່" ທ່ານກ່າວຄຳຂັດແຍ່ງໃດໃນຕອນຕົ້ນນັ້ນວ່າ "ຂ້າພະເຈົ້າຍອມຮັບວ່າ ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງມີຢູ່" ແຕ່ບໍ່ຍອມຮັບວ່າ ອັນຍາຕາວິນຊິອາໄສບຸກຄົນ" ຄຳນັ້ນຂອງທ່ານຜິດ ຯລຯ

**ຈະຕຸກກະໄນສັງສັນທະນະ ຈົບ**

## ๗. ລັກຂະນະຍຸດຕິ

## ວ່າດ້ວຍການຊັກຖາມເຖິງລັກສະນະ

[໕໖] ສກ. ທ່ານຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນມີປັດໄຈປຸງແຕ່ງ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ບຸກຄົນບໍ່ມີປັດໄຈປຸງແຕ່ງ ຯລຯ ບຸກຄົນຖືກປັດໄຈປຸງແຕ່ງ ຯລຯ ບຸກຄົນບໍ່ຖືກປັດໄຈປຸງແຕ່ງ ຯລຯ ບຸກຄົນທ່ຽງ ຯລຯ ບຸກຄົນບໍ່ທ່ຽງ ຯລຯ ບຸກຄົນມີນິມິດ ຯລຯ ບຸກຄົນບໍ່ມີນິມິດ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ (ຫຍໍ້)

[໕໔] ປຣ. ທ່ານຢັ່ງຮູ້ບຸກຄົນບໍ່ໄດ້ໂດຍສັດສິກັດຖະປະຣະມັດ ແມ່ນບໍ?

ສກ. ແມ່ນ

ປຣ. ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງມີຢູ່" ແມ່ນບໍ?

ສກ. ແມ່ນ

ປຣ. ບຸກຄົນມີປັດໄຈປຸງແຕ່ງແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ

ປຣ. ບຸກຄົນບໍ່ມີປັດໄຈປຸງແຕ່ງ ຯລຯ ບຸກຄົນຖືກປັດໄຈປຸງແຕ່ງ ຯລຯ ບຸກຄົນບໍ່ຖືກປັດໄຈປຸງແຕ່ງ ຯລຯ ບຸກຄົນທ່ຽງ ຯລຯ ບຸກຄົນບໍ່ທ່ຽງ ຯລຯ ບຸກຄົນມີນິມິດ ຯລຯ ບຸກຄົນບໍ່ມີນິມິດ ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ (ຫຍໍ້)

**ລັກຂະນະຍຸດຕິ ຈົບ**

## ໗. ວະຈະນະໂສທະນະ

## ວ່າດ້ວຍການຊັກຟອກຄຳເວົ້າ

[໕໕] ສກ. ບຸກຄົນເປັນສະພາວະທີ່ຢັ່ງຮູ້ໄດ້ ສະພາວະທີ່ຢັ່ງຮູ້ໄດ້ເປັນບຸກຄົນ ແມ່ນບໍ?

ປຣ. ບຸກຄົນເປັນສະພາວະທີ່ຢັ່ງຮູ້ໄດ້ ສະພາວະທີ່ຢັ່ງຮູ້ໄດ້ບາງຢ່າງເປັນບຸກຄົນ ບາງຢ່າງບໍ່ເປັນບຸກຄົນ

ສກ. ບຸກຄົນບາງສ່ວນເປັນສະພາວະທີ່ຢັ່ງຮູ້ໄດ້ ບາງສ່ວນເປັນສະພາວະທີ່ຢັ່ງຮູ້ບໍ່ໄດ້ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໕໖] ສກ. ບຸກຄົນເປັນສະພາວະທີ່ແທ້ຈິງ ສະພາວະທີ່ແທ້ຈິງເປັນບຸກຄົນແມ່ນບໍ?

ປຣ. ບຸກຄົນເປັນສະພາວະທີ່ແທ້ຈິງ ສະພາວະທີ່ແທ້ຈິງບາງຢ່າງເປັນບຸກຄົນ ບາງຢ່າງບໍ່ເປັນບຸກຄົນ

ສກ. ບຸກຄົນບາງສ່ວນເປັນສະພາວະທີ່ແທ້ຈິງ ບາງສ່ວນບໍ່ເປັນສະພາວະທີ່ແທ້ຈິງ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໕໗] ສກ. ບຸກຄົນເປັນສະພາວະທີ່ຄົງຢູ່ ສະພາວະທີ່ຄົງຢູ່ເປັນບຸກຄົນ ແມ່ນບໍ?

ປຣ. ບຸກຄົນເປັນສະພາວະທີ່ຄົງຢູ່ ສະພາວະທີ່ຄົງຢູ່ບາງຢ່າງເປັນບຸກຄົນ ບາງຢ່າງບໍ່ເປັນບຸກຄົນ

ສກ. ບຸກຄົນບາງສ່ວນເປັນສະພາວະທີ່ຄົງຢູ່ ບາງສ່ວນເປັນສະພາວະທີ່ບໍ່ຄົງຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໕໘] ສກ. ບຸກຄົນເປັນສະພາວະທີ່ຜາກົດ ສະພາວະທີ່ຜາກົດເປັນບຸກຄົນ ແມ່ນບໍ?

ປຣ. ບຸກຄົນເປັນສະພາວະທີ່ຜາກົດ ສະພາວະທີ່ຜາກົດບາງຢ່າງເປັນບຸກຄົນ ບາງຢ່າງບໍ່ເປັນບຸກຄົນ

ສກ. ບຸກຄົນບາງສ່ວນເປັນສະພາວະທີ່ຜາກົດ ບາງສ່ວນເປັນສະພາວະທີ່ບໍ່ຜາກົດ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໕໙] ສກ. ບຸກຄົນເປັນສະພາວະທີ່ມີຢູ່ ສະພາວະທີ່ມີຢູ່ເປັນບຸກຄົນ ແມ່ນບໍ?

ປຣ. ບຸກຄົນເປັນສະພາວະທີ່ມີຢູ່ ສະພາວະທີ່ມີຢູ່ບາງຢ່າງເປັນບຸກຄົນ ບາງຢ່າງບໍ່ເປັນບຸກຄົນ

ສກ. ບຸກຄົນບາງສ່ວນເປັນສະພາວະທີ່ມີຢູ່ ບາງສ່ວນເປັນສະພາວະທີ່ບໍ່ມີຢູ່ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໖໐] ສກ. ບຸກຄົນເປັນສະພາວະທີ່ມີຢູ່ ສະພາວະທີ່ມີຢູ່ບໍ່ເປັນບຸກຄົນທັງໝົດ ແມ່ນບໍ?

ປຣ. ແມ່ນ ຯລຯ

ສກ. ບຸກຄົນເປັນສະພາວະທີ່ບໍ່ມີຢູ່ ສະພາວະທີ່ບໍ່ມີຢູ່ບໍ່ເປັນບຸກຄົນທັງໝົດ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ (ຫຍໍ້)

**ວະຈະນະໂສທະນະ ຈົບ**

## ໑໐. ປັນຍັດຕານຸໂຍຄະ

## ວ່າດ້ວຍການຊັກຖາມເຖິງບັນຍັດ

[໖໑] ສກ. ຜູ້ມີຮູບໃນຮູບທາດເປັນບຸກຄົນ ແມ່ນບໍ?

ປຣ. ແມ່ນ

ສກ. ຜູ້ມີກາມໃນກາມທາດເປັນບຸກຄົນ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໖໘] ສກ. ຜູ້ມີຮູບໃນຮູບທາດເປັນສັດ ແມ່ນບໍ?

ປຣ. ແມ່ນ

ສກ. ຜູ້ມີກາມໃນກາມທາດເປັນສັດ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໖໙] ສກ. ຜູ້ບໍ່ມີຮູບໃນອະຮູບທາດເປັນບຸກຄົນ ແມ່ນບໍ?

ປຣ. ແມ່ນ

ສກ. ຜູ້ມີກາມໃນກາມທາດເປັນບຸກຄົນ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໐] ສກ. ຜູ້ບໍ່ມີຮູບໃນອະຮູບທາດເປັນສັດ ແມ່ນບໍ?

ປຣ. ແມ່ນ

ສກ. ຜູ້ມີກາມໃນກາມທາດເປັນສັດ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໑] ສກ. ຜູ້ມີຮູບໃນຮູບທາດເປັນບຸກຄົນ ຜູ້ບໍ່ມີຮູບໃນອະຮູບທາດເປັນບຸກຄົນ ແລະບາງຄົນຈຸຕິຈາກຮູບທາດແລ້ວເຂົ້າເຖິງອະຮູບທາດ ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ມີຮູບຂາດສູນ ບຸກຄົນຜູ້ບໍ່ມີຮູບເກີດໄດ້ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໒] ສກ. ຜູ້ມີຮູບໃນຮູບທາດເປັນສັດ ຜູ້ບໍ່ມີຮູບໃນອະຮູບທາດເປັນສັດ ແລະບາງຄົນຈຸຕິຈາກຮູບທາດແລ້ວ ເຂົ້າເຖິງອະຮູບທາດມີຢູ່ ແມ່ນບໍ?

ປຣ. ແມ່ນ

ສກ. ສັດມີຮູບຂາດສູນ ສັດບໍ່ມີຮູບເກີດໄດ້ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໓] ສກ. ເມື່ອບັນຍັດວ່າ ກາຍກັບສະຣີຣະ ຫຼື ບັນຍັດວ່າ ສະຣີຣະກັບກາຍໃຫ້ມີຄວາມໝາຍວ່າ ກາຍໂດຍບໍ່ແຍກ ສະຣີຣະແລະກາຍນີ້ນັ້ນມີຄວາມໝາຍແນວດຽວກັນ ສະເໝີກັນ ມີສ່ວນເທົ່າກັນ ມີສະພາບຄືກັນ ແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອບັນຍັດວ່າ ບຸກຄົນກັບຊີວະ ຫຼື ບັນຍັດວ່າ ຊີວະກັບບຸກຄົນ ໃຫ້ມີຄວາມໝາຍວ່າ ບຸກຄົນໂດຍບໍ່ແຍກ ຊີວະແລະບຸກຄົນນີ້ນັ້ນມີຄວາມໝາຍແນວດຽວກັນ ສະເໝີກັນມີສ່ວນເທົ່າກັນ ມີສະພາບຄືກັນ ແມ່ນບໍ?

ປຣ. ແມ່ນ

ສກ. ກາຍກັບບຸກຄົນເປັນຄົນລະຢ່າງກັນ ແມ່ນບໍ?

ປຣ. ແມ່ນ

ສກ. ຊີວະກັບສະຣີຣະເປັນຄົນລະຢ່າງກັນ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ທ່ານຈົ່ງຮັບນິກຄະຫະ ດັ່ງຕໍ່ໄປນີ້

ເມື່ອບັນຍັດວ່າ ກາຍກັບສະຣີຣະ ຫຼື ບັນຍັດວ່າ ສະຣີຣະກັບກາຍ ໃຫ້ມີຄວາມໝາຍວ່າ ກາຍ ໂດຍບໍ່ແຍກ ສະຣີຣະແລະກາຍນີ້ນັ້ນມີຄວາມໝາຍແນວດຽວກັນ ສະເໝີກັນ ມີສ່ວນເທົ່າກັນ ມີສະພາບຄືກັນ ເມື່ອບັນຍັດວ່າ ບຸກຄົນກັບຊີວະ ຫຼື ບັນຍັດວ່າ ຊີວະກັບບຸກຄົນໃຫ້ມີຄວາມໝາຍວ່າ ບຸກຄົນ ໂດຍບໍ່ແຍກຊີວະ ແລະບຸກຄົນນີ້ນັ້ນ ມີຄວາມໝາຍແນວດຽວກັນສະເໝີກັນ ມີສ່ວນເທົ່າກັນ ມີສະພາບຄືກັນ ກາຍກັບບຸກຄົນເປັນຄົນລະຢ່າງກັນ ດັ່ງນັ້ນ ທ່ານຈຶ່ງຄວນຍອມ-ຮັບວ່າ "ຊີວະກັບສະຣີຣະເປັນຄົນລະຢ່າງກັນ" ທ່ານກ່າວຄຳຂັດແຍ້ງໃດໃນຕອນຕົ້ນນັ້ນວ່າ "ຂ້າ-ພະເຈົ້າຍອມຮັບວ່າ ເມື່ອບັນຍັດວ່າ ກາຍກັບສະຣີຣະ ຫຼື ບັນຍັດວ່າ ສະຣີຣະກັບກາຍ ໃຫ້ມີຄວາມໝາຍວ່າ ກາຍ ໂດຍບໍ່ແຍກ ສະຣີຣະແລະກາຍນີ້ນັ້ນມີຄວາມໝາຍແນວດຽວກັນ ສະເໝີກັນ ມີສ່ວນເທົ່າກັນ ມີສະພາບຄືກັນ ເມື່ອບັນຍັດວ່າ ບຸກຄົນກັບຊີວະ ຫຼື ບັນຍັດວ່າ ຊີວະກັບບຸກຄົນ ໃຫ້ມີຄວາມໝາຍວ່າ ບຸກຄົນ ໂດຍບໍ່ແຍກ ຊີວະແລະບຸກຄົນນີ້ນັ້ນມີຄວາມໝາຍແນວດຽວກັນ ສະເໝີກັນ ມີສ່ວນເທົ່າກັນ ມີສະພາບຄືກັນ ກາຍກັບບຸກຄົນເປັນຄົນລະຢ່າງກັນ ແຕ່ບໍ່ຍອມຮັບວ່າ ຊີວະກັບສະຣີຣະເປັນຄົນລະຢ່າງກັນ" ຄຳນັ້ນຂອງທ່ານຜິດ ໗໘໗

ອັນໜຶ່ງ ຫາກທ່ານບໍ່ຍອມຮັບວ່າ "ຊີວະກັບສະຣີຣະເປັນຄົນລະຢ່າງກັນ" ທ່ານກໍບໍ່ຄວນຍອມຮັບວ່າ "ເມື່ອບັນຍັດວ່າ ກາຍກັບສະຣີຣະ ຫຼື ບັນຍັດວ່າ ສະຣີຣະກັບກາຍໃຫ້ມີຄວາມໝາຍວ່າ ກາຍ ໂດຍບໍ່ແຍກ ສະຣີຣະແລະກາຍນີ້ນັ້ນມີຄວາມໝາຍແນວດຽວກັນ ສະເໝີກັນ ມີສ່ວນເທົ່າກັນ ມີສະພາບຄືກັນ ເມື່ອບັນຍັດວ່າ ບຸກຄົນກັບຊີວະ ຫຼື ບັນຍັດວ່າ ຊີວະກັບບຸກຄົນ ໃຫ້ມີຄວາມໝາຍວ່າ ບຸກຄົນ ໂດຍບໍ່ແຍກ ຊີວະແລະບຸກຄົນນີ້ນັ້ນມີຄວາມໝາຍແນວດຽວກັນ ສະເໝີກັນ ມີສ່ວນເທົ່າກັນ ມີສະພາບຄືກັນ ກາຍກັບບຸກຄົນເປັນຄົນລະຢ່າງກັນ" ທ່ານກ່າວຄຳຂັດແຍ້ງໃດໃນຕອນຕົ້ນນັ້ນວ່າ "ຂ້າພະເຈົ້າຍອມຮັບວ່າ ເມື່ອບັນຍັດວ່າ ກາຍກັບສະຣີຣະ ຫຼື ບັນຍັດວ່າ ສະຣີຣະກັບກາຍ ໃຫ້ມີຄວາມໝາຍວ່າ ກາຍ ໂດຍບໍ່ແຍກ ສະຣີຣະແລະກາຍນີ້ນັ້ນມີຄວາມໝາຍແນວດຽວກັນ ສະເໝີກັນ ມີສ່ວນເທົ່າກັນ ມີສະພາບຄືກັນ ເມື່ອບັນຍັດວ່າ ບຸກຄົນ

ກັບຊີວະ ຫຼື ບັນຍັດວ່າ ຊີວະກັບບຸກຄົນ ໃຫ້ມີຄວາມໝາຍວ່າ ບຸກຄົນ ໂດຍບໍ່ແຍກ ຊີວະແລະບຸກຄົນນີ້ນັ້ນມີຄວາມໝາຍແນວດຽວກັນ ສະເໝີກັນ ມີສ່ວນເທົ່າກັນ ມີສະພາບຄືກັນ ກາຍກັບບຸກຄົນເປັນຄົນລະຢ່າງກັນ ແຕ່ບໍ່ຍອມຮັບວ່າ ຊີວະກັບສະຣີຣະເປັນຄົນລະຢ່າງກັນ" ຄຳນັ້ນຂອງທ່ານຜິດ ໆລໆ

[໖໘] ປຣ. ເມື່ອບັນຍັດວ່າ ກາຍກັບສະຣີຣະ ຫຼື ບັນຍັດວ່າ ສະຣີຣະກັບກາຍໃຫ້ມີຄວາມໝາຍວ່າ ກາຍ ໂດຍບໍ່ແຍກ ສະຣີຣະແລະກາຍນີ້ນັ້ນມີຄວາມໝາຍແນວດຽວກັນ ສະເໝີກັນມີສ່ວນເທົ່າກັນ ມີສະພາບຄືກັນ ແມ່ນບໍ?

ສກ. ແມ່ນ

ປຣ. ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງມີຢູ່" ແມ່ນບໍ?

ສກ. ແມ່ນ

ປຣ. ກາຍກັບບຸກຄົນເປັນຄົນລະຢ່າງກັນ ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ

ປຣ. ທ່ານຈົ່ງຮັບປະຕິກຳ ດັ່ງຕໍ່ໄປນີ້

ເມື່ອບັນຍັດວ່າ ກາຍກັບສະຣີຣະ ຫຼື ບັນຍັດວ່າ ສະຣີຣະກັບກາຍ ໃຫ້ມີຄວາມໝາຍວ່າ ກາຍ ໂດຍບໍ່ແຍກ ສະຣີຣະແລະກາຍນີ້ນັ້ນມີຄວາມໝາຍແນວດຽວກັນ ສະເໝີກັນ ມີສ່ວນເທົ່າກັນ ມີສະພາບຄືກັນ ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງມີຢູ່" ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ກາຍກັບບຸກຄົນເປັນຄົນລະຢ່າງກັນ" ທ່ານກ່າວຄຳຂັດແຍ່ງໃດໃນຕອນຕົ້ນນັ້ນວ່າ "ຂ້າພະເຈົ້າຍອມຮັບວ່າ ເມື່ອບັນຍັດວ່າ ກາຍກັບສະຣີຣະ ຫຼືບັນຍັດວ່າ ສະຣີຣະກັບກາຍ ໃຫ້ມີຄວາມໝາຍວ່າ ກາຍ ໂດຍບໍ່ແຍກ ສະຣີຣະແລະກາຍນີ້ນັ້ນມີຄວາມໝາຍແນວດຽວກັນ ສະເໝີກັນ ມີສ່ວນເທົ່າກັນ ມີສະພາບຄືກັນ ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງມີຢູ່" ແຕ່ບໍ່ຍອມຮັບວ່າ ກາຍກັບບຸກຄົນເປັນຄົນລະຢ່າງກັນ" ຄຳນັ້ນຂອງທ່ານຜິດ

ອັນໜຶ່ງ ຫາກທ່ານບໍ່ຍອມຮັບວ່າ "ກາຍກັບບຸກຄົນເປັນຄົນລະຢ່າງກັນ" ທ່ານກໍບໍ່ຄວນຍອມຮັບວ່າ "ເມື່ອບັນຍັດວ່າ ກາຍກັບສະຣີຣະ ຫຼືບັນຍັດວ່າ ສະຣີຣະກັບກາຍ ໃຫ້ມີຄວາມຫມາຍວ່າ ກາຍ ໂດຍບໍ່ແຍກ ສະຣີຣະແລະກາຍນີ້ນັ້ນມີຄວາມໝາຍແນວດຽວກັນ ສະເໝີກັນ ມີສ່ວນເທົ່າກັນ ມີສະພາບຄືກັນ ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງມີຢູ່" ທ່ານກ່າວຄຳຂັດແຍ່ງໃດໃນຕອນຕົ້ນນັ້ນວ່າ "ຂ້າພະເຈົ້າຍອມຮັບວ່າ ເມື່ອບັນຍັດວ່າ ກາຍກັບສະຣີຣະ ຫຼື ບັນຍັດວ່າ ສະຣີຣະກັບກາຍ ໃຫ້ມີຄວາມໝາຍວ່າ ກາຍ ໂດຍບໍ່ແຍກ ສະຣີຣະແລະກາຍນີ້ນັ້ນມີຄວາມໝາຍແນວດຽວກັນ ສະເໝີກັນ ມີສ່ວນເທົ່າກັນ ມີສະພາບຄືກັນ

ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງມີຢູ່" ແຕ່ບໍ່ຍອມຮັບວ່າ ກາຍກັບບຸກຄົນເປັນຄົນລະຢ່າງກັນ" ຄຳນັ້ນຂອງທ່ານຜິດ (ຫຍໍ້)

**ປັນຍັດຕານຸໂຍຄະ ຈົບ**

## ໑໑. ຄະຕິອະນຸໂຍຄະ

## ວ່າດ້ວຍການຊັກຖາມເຖິງຄະຕິ

[໗໙] ສກ. ບຸກຄົນທ່ອງທ່ຽວຈາກໂລກນີ້ໄປສູ່ໂລກອື່ນ ຈາກໂລກອື່ນມາສູ່ໂລກນີ້ ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຄົນດຽວກັນທ່ອງທ່ຽວຈາກໂລກນີ້ໄປສູ່ໂລກອື່ນ ຈາກໂລກອື່ນມາສູ່ໂລກນີ້ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໘໐] ສກ. ບຸກຄົນທ່ອງທ່ຽວຈາກໂລກນີ້ໄປສູ່ໂລກອື່ນຈາກໂລກອື່ນມາສູ່ໂລກນີ້ ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຄົນລະຄົນກັນທ່ອງທ່ຽວຈາກໂລກນີ້ໄປສູ່ໂລກອື່ນ ຈາກໂລກອື່ນມາສູ່ໂລກນີ້ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໘໑] ສກ. ບຸກຄົນທ່ອງທ່ຽວຈາກໂລກນີ້ໄປສູ່ໂລກອື່ນ ຈາກໂລກອື່ນມາສູ່ໂລກນີ້ ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນທັງທີ່ເປັນຄົນດຽວກັນ ແລະຄົນລະຄົນກັນທ່ອງທ່ຽວຈາກໂລກນີ້ໄປສູ່ໂລກອື່ນຈາກໂລກອື່ນມາສູ່ໂລກນີ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໘໒] ສກ. ບຸກຄົນທ່ອງທ່ຽວຈາກໂລກນີ້ໄປສູ່ໂລກອື່ນ ຈາກໂລກອື່ນມາສູ່ໂລກນີ້ ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຈະວ່າເປັນຄົນດຽວກັນກໍບໍ່ແມ່ນ ຈະວ່າເປັນຄົນລະຄົນກັນກໍບໍ່ແມ່ນທ່ອງທ່ຽວຈາກໂລກນີ້ໄປສູ່ໂລກອື່ນ ຈາກໂລກອື່ນມາສູ່ໂລກນີ້ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໓] ສກ. ບຸກຄົນທ່ອງທ່ຽວໄປຈາກໂລກນີ້ໄປສູ່ໂລກອື່ນ ຈາກໂລກອື່ນມາສູ່ໂລກນີ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຄົນດຽວກັນ ບຸກຄົນຄົນລະຄົນກັນ ບຸກຄົນທັງທີ່ເປັນຄົນດຽວກັນແລະຄົນລະຄົນກັນ ບຸກຄົນຈະວ່າເປັນຄົນດຽວກັນກໍບໍ່ແມ່ນ ຈະວ່າເປັນຄົນລະຄົນກັນກໍບໍ່ແມ່ນທ່ອງທ່ຽວຈາກໂລກນີ້ໄປສູ່ໂລກອື່ນ ຈາກໂລກອື່ນມາສູ່ໂລກນີ້ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໔] ປຣ. ທ່ານບໍ່ຍອມຮັບວ່າ "ບຸກຄົນທ່ອງທ່ຽວຈາກໂລກນີ້ໄປສູ່ໂລກອື່ນ ຈາກໂລກອື່ນມາສູ່ໂລກນີ້ ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ບຸກຄົນນັ້ນທ່ອງທ່ຽວໄປ ໆ ຊາດເປັນຢ່າງຫຼາຍ ກໍຈະເຮັດບ່ອນສຸດທຸກໄດ້ ຍ້ອນສັງໂຍດທັງປວງສິ້ນໄປ" ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ບຸກຄົນຈຶ່ງທ່ອງທ່ຽວຈາກໂລກນີ້ໄປສູ່ໂລກອື່ນ ຈາກໂລກອື່ນມາສູ່ໂລກນີ້ໄດ້.

[໗໕] ປຣ. ທ່ານບໍ່ຍອມຮັບວ່າ "ບຸກຄົນທ່ອງທ່ຽວຈາກໂລກນີ້ໄປສູ່ໂລກອື່ນ ຈາກໂລກອື່ນມາສູ່ໂລກນີ້" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ສົງສານນີ້ມີເບື້ອງຕົ້ນແລະເບື້ອງປາຍຮູ້ບໍ່ໄດ້ (ບ່ອນສຸດ) ເບື້ອງຕົ້ນ (ບ່ອນສຸດ) ເບື້ອງປາຍບໍ່ຜາກົດແກ່ເຫຼົ່າສັດ ຜູ້ຖືກອະວິດຊາກີດຂວາງ ຖືກຕັນຫາຜູກໄວ້ ວົນວຽນທ່ອງທ່ຽວໄປ"[໑] ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ບຸກຄົນຈຶ່ງທ່ອງທ່ຽວຈາກໂລກນີ້ໄປສູ່ໂລກອື່ນ ຈາກໂລກອື່ນມາສູ່ໂລກນີ້ໄດ້

[໗໖] ສກ. ບຸກຄົນທ່ອງທ່ຽວຈາກໂລກນີ້ໄປສູ່ໂລກອື່ນ ຈາກໂລກອື່ນມາສູ່ໂລກນີ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຄົນດຽວກັນນັ້ນເອງທ່ອງທ່ຽວຈາກໂລກນີ້ໄປສູ່ໂລກອື່ນ ຈາກໂລກອື່ນມາສູ່ໂລກນີ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໗] ສກ. ບຸກຄົນຄົນດຽວກັນນັ້ນເອງທ່ອງທ່ຽວຈາກໂລກນີ້ໄປສູ່ໂລກອື່ນ ຈາກໂລກອື່ນມາສູ່ໂລກນີ້ ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນບາງຄົນເປັນມະນຸດແລ້ວເປັນເທວະດາກໍມີແມ່ນບໍ?

ປຣ. ແມ່ນ

ສກ. ມະນຸດກັບເທວະດາເປັນບຸກຄົນຄົນດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໘] ສກ. ມະນຸດກັບເທວະດາເປັນບຸກຄົນຄົນດຽວກັນແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນເປັນມະນຸດແລ້ວຈຶ່ງເປັນເທວະດາ ເປັນເທວະດາແລ້ວຈຶ່ງເປັນມະນຸດ (ດັ່ງນັ້ນ) ຜູ້ເກີດເປັນມະນຸດກັບເທວະດາຈຶ່ງເປັນຄົນລະຄົນກັນ ຄຳທີ່ວ່າ "ບຸກຄົນຜູ້ເກີດເປັນມະນຸດຄົນດຽວກັນນີ້ນັ້ນເອງທ່ອງທ່ຽວໄປ" ດັ່ງນີ້ ຈຶ່ງຜິດ ຯລຯ

ອັນໜຶ່ງ ຫາກບຸກຄົນຄົນດຽວກັນນັ້ນເອງທ່ອງທ່ຽວໄປ ຈຸຕິຈາກໂລກນີ້ໄປສູ່ໂລກອື່ນ ບໍ່ແມ່ນຄົນລະຄົນກັນ ເມື່ອເປັນເຊັ່ນນີ້ ຄວາມຕາຍກໍຈັກບໍ່ມີ ແມ່ນແຕ່ປານາຕິບາດກໍຍັງຮູ້ບໍ່ໄດ້ ກຳມີຢູ່ ຜົນຂອງກຳກໍມີຢູ່ ຜົນຂອງກຳທັງຫຼາຍທີ່ເຮັດແລ້ວກໍມີຢູ່ ເມື່ອກຸສົນແລະອະກຸສົນໃຫ້ຜົນຢູ່ ຄຳທີ່ວ່າ "ບຸກຄົນຄົນດຽວກັນນີ້ນັ້ນເອງທ່ອງທ່ຽວໄປ" ດັ່ງນີ້ ຈຶ່ງຜິດ

[໗໙] ສກ. ບຸກຄົນຄົນດຽວກັນນັ້ນເອງທ່ອງທ່ຽວຈາກໂລກນີ້ໄປສູ່ໂລກອື່ນ ຈາກໂລກອື່ນມາສູ່ໂລກນີ້ ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນບາງຄົນເປັນມະນຸດແລ້ວເປັນຍັກມີຢູ່ ຯລຯ ເປັນເຜດ ຯລຯ ເປັນສັດນະຮົກ ຯລຯ ເປັນສັດເດຍຣັດສານ ຯລຯ ເປັນອູດ ຯລຯ ເປັນງົວ ຯລຯ ເປັນລາ ຯລຯ ເປັນໝູ ຯລຯ ເປັນຄວາຍ ມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ມະນຸດກັບຄວາຍເປັນບຸກຄົນຄົນດຽວກັນ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໘໐] ສກ. ມະນຸດກັບຄວາຍເປັນບຸກຄົນຄົນດຽວກັນ ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນເປັນມະນຸດແລ້ວເປັນຄວາຍ ເປັນຄວາຍແລ້ວເປັນມະນຸດ (ດັ່ງນັ້ນ) ຜູ້ເກີດເປັນມະນຸດກັບຄວາຍຈຶ່ງເປັນຄົນລະຄົນກັນ ຄຳທີ່ວ່າ "ບຸກຄົນຜູ້ເກີດເປັນມະນຸດຄົນດຽວກັນນີ້ນັ້ນເອງທ່ອງທ່ຽວໄປ" ດັ່ງນີ້ ຈຶ່ງຜິດ ฯລฯ

ອັນໜຶ່ງ ຫາກບຸກຄົນຄົນດຽວກັນນັ້ນເອງທ່ອງທ່ຽວໄປ ຈຸຕິຈາກໂລກນີ້ໄປສູ່ໂລກອື່ນ ບໍ່ແມ່ນຄົນລະຄົນກັນ ເມື່ອເປັນເຊັ່ນນີ້ ຄວາມຕາຍກໍຈັກບໍ່ມີ ແມ່ນແຕ່ປານາຕິບາດກໍຢັ່ງຮູ້ບໍ່ໄດ້ ກຳມີຢູ່ ຜົນຂອງກຳກໍມີຢູ່ ຜົນຂອງກຳທັງຫຼາຍທີ່ເຮັດແລ້ວກໍມີຢູ່ ເມື່ອກຸສົນແລະອະກຸສົນໃຫ້ຜົນຢູ່ ຄຳທີ່ວ່າ "ບຸກຄົນຄົນດຽວກັນນີ້ນັ້ນເອງທ່ອງທ່ຽວໄປ" ດັ່ງນີ້ ຈຶ່ງຜິດ

[໗໑] ສກ. ບຸກຄົນຄົນດຽວກັນນັ້ນເອງທ່ອງທ່ຽວຈາກໂລກນີ້ໄປສູ່ໂລກອື່ນ ຈາກໂລກອື່ນມາສູ່ໂລກນີ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນບາງຄົນເປັນກະສັດແລ້ວເປັນພາມມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ກະສັດກັບພາມເປັນບຸກຄົນຄົນດຽວກັນ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໗໘] ສກ. ບຸກຄົນບາງຄົນເປັນກະສັດແລ້ວເປັນແພດ ฯລฯ ເປັນສູດມີຢູ່ ແມ່ນບໍ?

ປຣ. ແມ່ນ

ສກ. ກະສັດກັບສູດເປັນບຸກຄົນຄົນດຽວກັນ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໗໙] ສກ. ບຸກຄົນບາງຄົນເປັນພາມແລ້ວເປັນແພດ ฯລฯ ເປັນສູດ ฯລฯ ເປັນກະສັດມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພາມກັບກະສັດເປັນບຸກຄົນຄົນດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໗໘] ສກ. ບຸກຄົນບາງຄົນເປັນແພດແລ້ວເປັນສູດ ฯລฯ ເປັນກະສັດ ฯລฯ ເປັນພາມມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ແພດກັບພາມເປັນບຸກຄົນຄົນດຽວກັນ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໗໕] ສກ. ບຸກຄົນບາງຄົນເປັນສູດແລ້ວເປັນກະສັດ ຯລຯ ເປັນພາມ ຯລຯ ເປັນແພດມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ສູດກັບແພດເປັນບຸກຄົນຄົນດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໖] ສກ. ບຸກຄົນຄົນດຽວກັນນັ້ນ ເອງທ່ອງທ່ຽວຈາກໂລກນີ້ໄປສູ່ໂລກອື່ນ ຈາກໂລກອື່ນມາສູ່ໂລກນີ້ແມ່ນບໍ?

ປຣ. ແມ່ນ

ສກ. ຄົນມືກຸດກໍເປັນຄົນມືກຸດຢູ່ຄືເກົ່າ ຄົນຕີນກຸດກໍເປັນຄົນຕີນກຸດຢູ່ຄືເກົ່າ ຄົນມືມືແລະຕີນກຸດກໍເປັນຄົນມືມືແລະຕີນກຸດຢູ່ຄືເກົ່າ ຯລຯ ຄົນຫູແຫວ່ງ ຯລຯ ຄົນດັງແຫວ່ງ ຯລຯ ຄົນທັງຫູແຫວ່ງທັງດັງແຫວ່ງ ຯລຯ ຄົນນິ້ວກຸດ ຯລຯ ຄົນມີຫົວໂປ້ມືຫົວໂປ້ຕີນກຸດ ຯລຯ ຄົນເອັນໃຫຍ່ຂາດ ຯລຯ ຄົນມືຫງິກ ຯລຯ ຄົນມີແປ ຯລຯ ຄົນເປັນໂຣກເຮື້ອນ ຯລຯ ຄົນເປັນໂຣກຕ່ອມ ຯລຯ ຄົນເປັນໂຣກກາກ ຯລຯ ຄົນເປັນໂຣກມ້ອງຄໍ່ ຯລຯ ຄົນເປັນໂຣກລົມບ້າໝູ ຯລຯ ເປັນອູດກໍເປັນອູດຢູ່ຄືເກົ່າ ຯລຯ ງົວ ຯລຯ ລາ ຯລຯ ໝູ ຯລຯ ຄວາຍກໍເປັນຄວາຍຢູ່ຄືເກົ່າແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໗] ປຣ. ທ່ານບໍ່ຍອມຮັບວ່າ "ບຸກຄົນຄົນດຽວກັນນັ້ນເອງທ່ອງທ່ຽວຈາກໂລກນີ້ໄປສູ່ໂລກອື່ນ ຈາກໂລກອື່ນມາສູ່ໂລກນີ້" ແມ່ນບໍ?

ສກ. ແມ່ນ

ປຣ. ບຸກຄົນຜູ້ເປັນໂສດາບັນຈຸຕິຈາກມະນຸດໂລກໄປເກີດໃນເທວະໂລກແລ້ວ ຍັງເປັນໂສດາບັນຢູ່ຄືເກົ່າແມ່ນໃນເທວະໂລກນັ້ນບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກບຸກຄົນຜູ້ເປັນໂສດາບັນຈຸຕິຈາກມະນຸດໂລກໄປເກີດໃນເທວະໂລກແລ້ວ ຍັງເປັນ ໂສດາບັນຢູ່ຄືເກົ່າແມ່ນໃນເທວະໂລກນັ້ນ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ບຸກຄົນຄົນດຽວກັນນັ້ນເອງທ່ອງທ່ຽວຈາກໂລກນີ້ໄປສູ່ໂລກອື່ນ ຈາກໂລກອື່ນມາສູ່ໂລກນີ້"

[໗໘] ສກ. ຍ້ອນທ່ານເຂົ້າໃຈວ່າ "ບຸກຄົນຜູ້ເປັນໂສດາບັນຈຸຕິຈາກມະນຸດໂລກໄປເກີດໃນເທວະໂລກແລ້ວຍັງເປັນໂສດາບັນຢູ່ຄືເກົ່າແມ່ນໃນເທວະໂລກນັ້ນ" ຈຶ່ງຍອມຮັບວ່າ "ບຸກຄົນຄົນດຽວກັນນັ້ນເອງທ່ອງທ່ຽວຈາກໂລກນີ້ໄປສູ່ໂລກອື່ນ ຈາກໂລກອື່ນມາສູ່ໂລກນີ້" ແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນທ່ານເຂົ້າໃຈວ່າ "ບຸກຄົນຜູ້ເປັນໂສດາບັນຈຸຕິຈາກມະນຸດໂລກໄປເກີດໃນເທວະໂລກແລ້ວ ຍັງເປັນມະນຸດຢູ່ຄືເກົ່າແມ່ນໃນເທວະໂລກນັ້ນ" ຈຶ່ງຍອມຮັບວ່າ "ບຸກຄົນຄົນດຽວກັນນັ້ນເອງທ່ອງທ່ຽວຈາກໂລກນີ້ໄປສູ່ໂລກອື່ນຈາກໂລກອື່ນມາສູ່ໂລກນີ້" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໒໙] ສກ. ບຸກຄົນຄົນດຽວກັນນັ້ນເອງທ່ອງທ່ຽວຈາກໂລກນີ້ໄປສູ່ໂລກອື່ນ ຈາກໂລກອື່ນມາສູ່ໂລກນີ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນບໍ່ແມ່ນຄົນລະຄົນກັນ ບໍ່ແປຜັນ ທ່ອງທ່ຽວໄປແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໓໐] ສກ. ບຸກຄົນບໍ່ແມ່ນຄົນລະຄົນກັນ ບໍ່ແປຜັນ ທ່ອງທ່ຽວໄປແມ່ນບໍ?

ປຣ. ແມ່ນ

ສກ. ຄົນມືກຸດກໍເປັນຄົນມືກຸດຢູ່ຄືເກົ່າ ຯລຯ ຄົນຕີນກຸດກໍເປັນຄົນຕີນກຸດຢູ່ຄືເກົ່າ ຯລຯ ຄົນມືມີແລະຕີນກຸດກໍເປັນຄົນມືມືແລະຕີນກຸດຢູ່ຄືເກົ່າ ຯລຯ ຄົນຫູແຫວ່ງ ຯລຯ ຄົນດັງແຫວ່ງ ຯລຯ ຄົນທັງຫູແຫວ່ງທັງດັງແຫວ່ງ ຯລຯ ຄົນນິ້ວກຸດ ຯລຯ ຄົນມືຫົວໂປ້ມືຫົວໂປ້ຕີນກຸດ ຯລຯ ຄົນເອັນໃຫຍ່ຂາດ ຯລຯ ຄົນມືຫງີກ ຯລຯ ຄົນເປັນໂຣກເຮື້ອນ ຯລຯ ຄົນເປັນໂຣກຕ່ອມ ຯລຯ ຄົນເປັນໂຣກກາກ ຯລຯ ຄົນເປັນໂຣກມ້ອງຄໍ່ ຯລຯ ຄົນເປັນໂຣກລົມບ້າໝູ ຯລຯ ອູດ ຯລຯ ງົວ ຯລຯ ລາ ຯລຯ ໝູ ຯລຯ ຄວາຍກໍເປັນຄວາຍຢູ່ຄືເກົ່າແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໓໑] ສກ. ບຸກຄົນຄົນດຽວກັນນັ້ນເອງທ່ອງທ່ຽວຈາກໂລກນີ້ໄປສູ່ໂລກອື່ນ ຈາກໂລກອື່ນມາສູ່ໂລກນີ້ແມ່ນບໍ?

ປຣ. ແມ່ນ

ສກ. ເປັນຜູ້ມີຮູບທ່ອງທ່ຽວໄປ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເປັນຜູ້ມີຮູບທ່ອງທ່ຽວໄປ ແມ່ນບໍ?

ປຣ. ແມ່ນ

ສກ. ຊີວະກັບສະຣີຣະເປັນແນວດຽວກັນ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເປັນຜູ້ມີເວທະນາ ຯລຯ ເປັນຜູ້ມີສັນຍາ ຯລຯ ເປັນຜູ້ມີສັງຂານ ຯລຯ ເປັນຜູ້ມີວິນຍານທ່ອງທ່ຽວໄປແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເປັນຜູ້ມີວິນຍານທ່ອງທ່ຽວໄປແມ່ນບໍ?

ປຣ. ແມ່ນ

ສກ. ຊີວະກັບສະຣີຣະເປັນແນວດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

[໗໔] ສກ. ບຸກຄົນຄົນດຽວກັນນັ້ນເອງທ່ອງທ່ຽວຈາກໂລກນີ້ໄປສູ່ໂລກອື່ນ ຈາກໂລກອື່ນມາສູ່ໂລກນີ້ແມ່ນບໍ?

ປຣ. ແມ່ນ

ສກ. ເປັນຜູ້ບໍ່ມີຮູບທ່ອງທ່ຽວໄປແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ເປັນຜູ້ບໍ່ມີຮູບທ່ອງທ່ຽວໄປແມ່ນບໍ?

ປຣ. ແມ່ນ

ສກ. ຊີວະກັບສະຣີຣະເປັນຄົນລະຢ່າງກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ເປັນຜູ້ບໍ່ມີເວທະນາ ໆລໆ ເປັນຜູ້ບໍ່ມີສັນຍາ ໆລໆ ເປັນຜູ້ບໍ່ມີສັງຂານ ໆລໆ ເປັນຜູ້ບໍ່ມີວິນຍານທ່ອງທ່ຽວໄປແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ໖ ໆລໆ

ສກ. ເປັນຜູ້ບໍ່ມີວິນຍານທ່ອງທ່ຽວໄປແມ່ນບໍ?

ປຣ. ແມ່ນ

ສກ. ຊີວະກັບສະຣີຣະເປັນຄົນລະຢ່າງກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

[໗໖] ສກ. ບຸກຄົນຄົນດຽວກັນນັ້ນເອງທ່ອງທ່ຽວຈາກໂລກນີ້ໄປສູ່ໂລກອື່ນ ຈາກໂລກອື່ນມາສູ່ໂລກນີ້ແມ່ນບໍ?

ປຣ. ແມ່ນ

ສກ. ຮູບທ່ອງທ່ຽວໄປແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ຮູບທ່ອງທ່ຽວໄປແມ່ນບໍ?

ປຣ. ແມ່ນ

ສກ. ຊີວະກັບສະຣີຣະເປັນແນວດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ເວທະນາ ໆລໆ ສັນຍາ ໆລໆ ສັງຂານ ໆລໆ ວິນຍານທ່ອງທ່ຽວໄປແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

ສກ. ວິນຍານທ່ອງທ່ຽວໄປແມ່ນບໍ?

ປຣ. ແມ່ນ

ສກ. ຊີວະກັບສະຣີຣະເປັນແບບດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

[໙໔] ສກ. ບຸກຄົນຄົນດຽວກັນນັ້ນເອງທ່ອງທ່ຽວຈາກໂລກນີ້ໄປສູ່ໂລກອື່ນ ຈາກໂລກອື່ນມາສູ່ໂລກນີ້ແມ່ນບໍ?

ປຣ. ແມ່ນ

ສກ. ຮູບບໍ່ທ່ອງທ່ຽວໄປແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

ສກ. ຮູບບໍ່ທ່ອງທ່ຽວໄປແມ່ນບໍ?

ປຣ. ແມ່ນ

ສກ. ຊີວະກັບສະຣີຣະເປັນຄົນລະຢ່າງກັນແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

ສກ. ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານບໍ່ທ່ອງທ່ຽວໄປແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

ສກ. ວິນຍານບໍ່ທ່ອງທ່ຽວໄປແມ່ນບໍ?

ປຣ. ແມ່ນ

ສກ. ຊີວະກັບສະຣີຣະເປັນຄົນລະຢ່າງກັນແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ (ຫຍໍ້)

ສກ. ເມື່ອຂັນແຕກດັບ ຫາກບຸກຄົນນັ້ນແຕກດັບ ກໍຈະເປັນອຸດເສທະທິດຖິທີ່ພຣະພຸດທະເຈົ້າໄດ້ຊົງເວັ້ນ ເມື່ອຂັນແຕກດັບ ຫາກບຸກຄົນບໍ່ແຕກດັບ ບຸກຄົນກໍຈະທ່ຽງສະເໝີເໝືອນນິບພານ

**ຄະຕິອະນຸໂຍຄະ ຈົບ**

## ໑໘. ອຸປາທາປັນຍັດຕານຸໂຍຄະ

## ວ່າດ້ວຍການຊັກຖາມເຖິງອຸປາທາບັນຍັດ

[໙໕] ສກ. ຍ້ອນອາໄສຮູບຈຶ່ງບັນຍັດບຸກຄົນແມ່ນບໍ?

ປຣ. ແມ່ນ

ສກ. ຮູບບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສປັດໄຈເກີດຂຶ້ນ ມີຄວາມສິ້ນໄປ ເສື່ອມໄປ ຄາຍອອກ ດັບໄປ ແປຜັນໄປເປັນທຳມະດາ ແມ່ນບໍ?

ປຣ. ແມ່ນ

ສກ. ແມ່ນບຸກຄົນກໍບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສປັດໄຈເກີດຂຶ້ນ ມີຄວາມສິ້ນໄປ ເສື່ອມໄປ ຄາຍອອກ ດັບໄປ ແປຜັນໄປເປັນທຳມະດາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໕໖] ສກ. ຍ້ອນອາໄສເວທະນາ ຯລຯ ຍ້ອນອາໄສສັນຍາ ຯລຯ ຍ້ອນອາໄສສັງຂານ ຯລຯ ຍ້ອນອາໄສວິນຍານ ຈຶ່ງບັນຍັດບຸກຄົນແມ່ນບໍ?

ປຣ. ແມ່ນ

ສກ. ວິນຍານບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສປັດໄຈເກີດຂຶ້ນ ມີຄວາມສິ້ນໄປ ເສື່ອມໄປ ຄາຍອອກ ດັບໄປ ແປຜັນໄປເປັນທຳມະດາ ແມ່ນບໍ?

ປຣ. ແມ່ນ

ສກ. ແມ່ນບຸກຄົນກໍບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສປັດໄຈເກີດຂຶ້ນ ມີຄວາມສິ້ນໄປ ເສື່ອມໄປ ຄາຍອອກ ດັບໄປ ແປຜັນໄປເປັນທຳມະດາ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໕໗] ສກ. ຍ້ອນອາໄສຮູບຈຶ່ງບັນຍັດບຸກຄົນ ແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນອາໄສຮູບສີຂຽວ ຈຶ່ງບັນຍັດບຸກຄົນສີຂຽວ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຍ້ອນອາໄສຮູບສີເຫຼືອງ ຯລຯ ຍ້ອນອາໄສຮູບສີແດງ ຯລຯ ຍ້ອນອາໄສ ຮູບສີຂາວ ຯລຯ ຍ້ອນອາໄສຮູບທີ່ເຫັນໄດ້ ຯລຯ ຍ້ອນອາໄສຮູບທີ່ເຫັນບໍ່ໄດ້ ຯລຯ ຍ້ອນອາໄສຮູບທີ່ກະທົບໄດ້ ຯລຯ ຍ້ອນອາໄສຮູບທີ່ກະທົບບໍ່ໄດ້ ຈຶ່ງບັນຍັດບຸກຄົນທີ່ກະທົບບໍ່ໄດ້ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໕໘] ສກ. ຍ້ອນອາໄສເວທະນາຈຶ່ງບັນຍັດບຸກຄົນແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນອາໄສເວທະນາທີ່ເປັນກຸສົນ ຈຶ່ງບັນຍັດບຸກຄົນທີ່ເປັນກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຍ້ອນອາໄສເວທະນາທີ່ເປັນກຸສົນ ຈຶ່ງບັນຍັດບຸກຄົນທີ່ເປັນກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ເວທະນາທີ່ເປັນກຸສົນ ມີຜົນ ມີວິບາກ ມີຜົນໜ້າປາຖະໜາ ມີຜົນໜ້າຍິນດີ ມີຜົນໜ້າພໍໃຈ ມີຜົນເຢືອກເຢັນ ມີສຸກເປັນກຳໄລ ມີສຸກເປັນວິບາກແມ່ນບໍ?

ປຣ. ແມ່ນ

ສກ. ແມ່ນບຸກຄົນທີ່ເປັນກຸສົນກໍມີຜົນ ມີວິບາກ ມີຜົນໜ້າປາຖະໜາ ມີຜົນໜ້າຍິນດີ ມີຜົນໜ້າພໍໃຈ ມີຜົນເຢືອກເຢັນ ມີສຸກເປັນກຳໄລ ມີສຸກເປັນວິບາກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

[໙໙] ສກ. ຍ້ອນອາໄສເວທະນາຈຶ່ງບັນຍັດບຸກຄົນແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນອາໄສເວທະນາທີ່ເປັນອະກຸສົນ ຈຶ່ງບັນຍັດບຸກຄົນທີ່ເປັນອະກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ຍ້ອນອາໄສເວທະນາທີ່ເປັນອະກຸສົນ ຈຶ່ງບັນຍັດບຸກຄົນທີ່ເປັນອະກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ເວທະນາທີ່ເປັນອະກຸສົນມີຜົນ ມີວິບາກ ມີຜົນບໍ່ໜ້າປາຖະໜາ ມີຜົນບໍ່ໜ້າຍິນດີ ມີຜົນບໍ່ໜ້າພໍໃຈ ມີຜົນຮ້ອນຮົນ ມີທຸກເປັນກຳໄລ ມີທຸກເປັນວິບາກ ແມ່ນບໍ?

ປຣ. ແມ່ນ

ສກ. ແມ່ນບຸກຄົນທີ່ເປັນອະກຸສົນກໍມີຜົນ ມີວິບາກ ມີຜົນບໍ່ໜ້າປາຖະໜາ ມີຜົນບໍ່ໜ້າຍິນດີ ມີຜົນບໍ່ໜ້າພໍໃຈ ມີຜົນຮ້ອນຮົນ ມີທຸກເປັນກຳໄລ ມີທຸກເປັນວິບາກ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

[໑໐໐] ສກ. ຍ້ອນອາໄສເວທະນາ ຈຶ່ງບັນຍັດບຸກຄົນ ແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນອາໄສເວທະນາທີ່ເປັນອັບພະຍາກະຕະ ຈຶ່ງບັນຍັດບຸກຄົນທີ່ເປັນອັບພະຍາກະຕະ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ຍ້ອນອາໄສເວທະນາທີ່ເປັນອັບພະຍາກະຕະ ຈຶ່ງບັນຍັດບຸກຄົນທີ່ເປັນອັບພະຍາກະຕະແມ່ນບໍ?

ປຣ. ແມ່ນ

ສກ. ເວທະນາທີ່ເປັນອັບພະຍາກະຕະບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສປັດໄຈເກີດຂຶ້ນ ມີຄວາມສິ້ນໄປ ເສື່ອມໄປ ຄາຍອອກ ດັບໄປ ແປຜັນໄປເປັນທຳມະດາ ແມ່ນບໍ?

ປຣ. ແມ່ນ

ສກ. ແມ່ນບຸກຄົນທີ່ເປັນອັບພະຍາກະຕະກໍບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສປັດໄຈເກີດຂຶ້ນ ມີຄວາມສິ້ນໄປ ເສື່ອມໄປ ຄາຍອອກ ດັບໄປ ແປຜັນໄປເປັນທຳມະດາ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໐໑] ສກ. ຍ້ອນອາໄສສັນຍາ ຯລຯ ຍ້ອນອາໄສສັງຂານ ຯລຯ ຍ້ອນອາໄສວິນຍານຈຶ່ງບັນຍັດບຸກຄົນແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນອາໄສວິນຍານທີ່ເປັນກຸສົນ ຈຶ່ງບັນຍັດບຸກຄົນທີ່ເປັນກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຍ້ອນອາໄສວິນຍານທີ່ເປັນກຸສົນ ຈຶ່ງບັນຍັດບຸກຄົນທີ່ເປັນກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ວິນຍານທີ່ເປັນກຸສົນມີຜົນ ມີວິບາກ ມີຜົນໜ້າປາຖະໜາ ມີຜົນໜ້າຍິນດີ ມີຜົນໜ້າພໍໃຈ ມີຜົນເຢືອກເຢັນ ມີສຸກເປັນກຳໄລ ມີສຸກເປັນວິບາກແມ່ນບໍ?

ປຣ. ແມ່ນ

ສກ. ແມ່ນບຸກຄົນທີ່ເປັນກຸສົນກໍມີຜົນ ມີວິບາກ ມີຜົນໜ້າປາຖະໜາ ມີຜົນໜ້າຍິນດີ ມີຜົນໜ້າພໍໃຈ ມີຜົນເຢືອກເຢັນ ມີສຸກເປັນກຳໄລ ມີສຸກເປັນວິບາກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໐໘] ສກ. ຍ້ອນອາໄສວິນຍານຈຶ່ງບັນຍັດບຸກຄົນແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນອາໄສວິນຍານທີ່ເປັນອະກຸສົນ ຈຶ່ງບັນຍັດບຸກຄົນທີ່ເປັນອະກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຍ້ອນອາໄສວິນຍານທີ່ເປັນອະກຸສົນ ຈຶ່ງບັນຍັດບຸກຄົນທີ່ເປັນອະກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ວິນຍານທີ່ເປັນອະກຸສົນມີຜົນ ມີວິບາກ ມີຜົນບໍ່ໜ້າປາຖະໜາ ມີຜົນບໍ່ໜ້າຍິນດີ ມີຜົນບໍ່ໜ້າພໍໃຈ ມີຜົນຮ້ອນຮົນ ມີທຸກເປັນກຳໄລ ມີທຸກເປັນວິບາກແມ່ນບໍ?

ປຣ. ແມ່ນ

ສກ. ແມ່ນບຸກຄົນທີ່ເປັນອະກຸສົນກໍມີຜົນ ມີວິບາກ ມີຜົນບໍ່ໜ້າປາຖະໜາ ມີຜົນບໍ່ໜ້າຍິນດີ ມີຜົນບໍ່ໜ້າພໍໃຈ ມີຜົນຮ້ອນຮົນ ມີທຸກເປັນກຳໄລ ມີທຸກເປັນວິບາກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໐໙] ສກ. ຍ້ອນອາໄສວິນຍານ ຈຶ່ງບັນຍັດບຸກຄົນແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນອາໄສວິນຍານທີ່ເປັນອັບພະຍາກະຕະ ຈຶ່ງບັນຍັດບຸກຄົນທີ່ເປັນອັບພະຍາກະຕະ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ຍ້ອນອາໄສວິນຍານທີ່ເປັນອັບພະຍາກະຕະ ຈຶ່ງບັນຍັດບຸກຄົນທີ່ເປັນອັບພະຍາກະຕະ ແມ່ນບໍ?

ປຣ. ແມ່ນ

ສກ. ວິນຍານທີ່ເປັນອັບພະຍາກະຕະບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສປັດໄຈເກີດຂຶ້ນ ມີຄວາມສິ້ນໄປ ເສື່ອມໄປ ຄາຍອອກ ດັບໄປ ແປຜັນໄປເປັນທຳມະດາແມ່ນບໍ?

ປຣ. ແມ່ນ

ສກ. ແມ່ນບຸກຄົນທີ່ເປັນອັບພະຍາກະຕະກໍບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສປັດໄຈເກີດຂຶ້ນ ມີຄວາມສິ້ນໄປ ເສື່ອມໄປ ຄາຍອອກ ດັບໄປ ແປຜັນໄປເປັນທຳມະດາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

[໑໐໔] ສກ. ຍ້ອນອາໄສຈັກຂຸ ທ່ານຈຶ່ງຍອມຮັບວ່າ "ບຸກຄົນມີຈັກຂຸ" ແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອຈັກຂຸດັບແລ້ວ ທ່ານຈຶ່ງຍອມຮັບວ່າ "ບຸກຄົນຜູ້ມີຈັກຂຸດັບ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ຍ້ອນອາໄສໂສຕະ ฯลฯ ຍ້ອນອາໄສຄານະ ฯลฯ ຍ້ອນອາໄສຊິວຫາ ฯลฯ ຍ້ອນອາໄສກາຍ ฯลฯ ຍ້ອນອາໄສມະໂນ ທ່ານຈຶ່ງຍອມຮັບວ່າ "ບຸກຄົນຜູ້ມີມະໂນ" ແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອມະໂນດັບແລ້ວ ທ່ານຈຶ່ງຍອມຮັບວ່າ "ບຸກຄົນຜູ້ມີມະໂນດັບ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

[໑໐໕] ສກ. ຍ້ອນອາໄສມິດສາທິດຖິ ທ່ານຈຶ່ງຍອມຮັບວ່າ "ບຸກຄົນເປັນມິດສາທິດຖິ" ແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອມິດສາທິດຖິດັບແລ້ວ ທ່ານຈຶ່ງຍອມຮັບວ່າ "ບຸກຄົນຜູ້ເປັນມິດສາທິດຖິດັບ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ຍ້ອນອາໄສມິດສາສັງກັບປະ ฯลฯ ຍ້ອນອາໄສມິດສາວາຈາ ฯลฯ ຍ້ອນອາໄສມິດສາກຳມັນຕະ ฯลฯ ຍ້ອນອາໄສມິດສາອາຊີວະ ฯลฯ ຍ້ອນອາໄສມິດສາວາຍາມະ ฯลฯ

ຍ້ອນອາໄສມິດສາສະຕິ ຯລຯ ຍ້ອນອາໄສມິດສາສະມາທິ ທ່ານຈຶ່ງຍອມຮັບວ່າ "ບຸກຄົນ ເປັນມິດສາສະມາທິ" ແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອມິດສາສະມາທິດັບແລ້ວ ທ່ານຈຶ່ງຍອມຮັບວ່າ "ບຸກຄົນຜູ້ເປັນມິດສາສະມາທິດັບ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

[໑໐໖] ສກ. ຍ້ອນອາໄສສຳມາທິດຖິ ທ່ານຈຶ່ງຍອມຮັບວ່າ "ບຸກຄົນຜູ້ເປັນສຳມາທິດຖິ" ແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອສຳມາທິດຖິດັບແລ້ວທ່ານຈຶ່ງຍອມຮັບວ່າ "ບຸກຄົນຜູ້ເປັນສຳມາທິດຖິດັບ"ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຍ້ອນອາໄສສຳມາສັງກັບປະ ຯລຯ ຍ້ອນອາໄສສຳມາວາຈາ ຯລຯ ຍ້ອນອາໄສສຳມາກຳມັນຕະ ຯລຯ ຍ້ອນອາໄສສຳມາອາຊີວະ ຯລຯ ຍ້ອນອາໄສສຳມາວາຍາມະ ຯລຯ ຍ້ອນອາໄສສຳມາສະຕິ ຯລຯ ຍ້ອນອາໄສສຳມາສະມາທິ ທ່ານຈຶ່ງຍອມຮັບວ່າ "ບຸກຄົນຜູ້ເປັນສຳມາສະມາທິ" ແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອສຳມາສະມາທິດັບແລ້ວ ທ່ານຈຶ່ງຍອມຮັບວ່າ "ບຸກຄົນຜູ້ເປັນສຳມາສະມາທິດັບ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໐໗] ສກ. ຍ້ອນອາໄສຮູບ ຍ້ອນອາໄສເວທະນາ ຈຶ່ງບັນຍັດບຸກຄົນແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນອາໄສຂັນ ໒ ຈຶ່ງບັນຍັດບຸກຄົນ ໒ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຍ້ອນອາໄສຮູບ ຍ້ອນອາໄສເວທະນາ ຍ້ອນອາໄສສັນຍາ ຍ້ອນອາໄສສັງຂານ ຍ້ອນອາໄສວິນຍານ ຈຶ່ງບັນຍັດບຸກຄົນແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນອາໄສຂັນ ໕ ຈຶ່ງບັນຍັດບຸກຄົນ ໕ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໐໘] ສກ. ຍ້ອນອາໄສຈັກຂາຍະຕະນະ ຍ້ອນອາໄສໂສຕາຍະຕະນະ ຈຶ່ງບັນຍັດບຸກຄົນແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນອາໄສອາຍະຕະນະ ໔ ຈຶ່ງບັນຍັດບຸກຄົນ ໔ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຍ້ອນອາໄສຈັກຂາຍະຕະນະ ຍ້ອນອາໄສໂສຕາຍະຕະນະ ຯລຯ ຍ້ອນອາໄສທໍາມາຍະຕະນະ ຈຶ່ງບັນຍັດບຸກຄົນແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນອາໄສອາຍະຕະນະ ໑໒ ຈຶ່ງບັນຍັດບຸກຄົນ ໑໒ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໐໗] ສກ. ຍ້ອນອາໄສຈັກຂຸທາດ ຍ້ອນອາໄສໂສຕະທາດ ຈຶ່ງບັນຍັດບຸກຄົນແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນອາໄສທາດ ໔ ຈຶ່ງບັນຍັດບຸກຄົນ ໔ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຍ້ອນອາໄສຈັກຂຸທາດ ຍ້ອນອາໄສໂສຕະທາດ ຯລຯ ຍ້ອນອາໄສທໍາມະທາດ ຈຶ່ງບັນຍັດບຸກຄົນແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນອາໄສທາດ ໑໘ ຈຶ່ງບັນຍັດບຸກຄົນ ໑໘ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໑໐] ສກ. ຍ້ອນອາໄສຈັກຂຸນຊີ ຍ້ອນອາໄສໂສຕິນຊີ ຈຶ່ງບັນຍັດບຸກຄົນແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນອາໄສອິນຊີ ໔ ຈຶ່ງບັນຍັດບຸກຄົນ ໔ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຍ້ອນອາໄສຈັກຂຸນຊີ ຍ້ອນອາໄສໂສຕິນຊີ ຯລຯ ຍ້ອນອາໄສອັນຍາຕາວິນຊີ ຈຶ່ງບັນຍັດບຸກຄົນແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນອາໄສອິນຊີ ໔໔ ຈຶ່ງບັນຍັດບຸກຄົນ ໔໔ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໑໑] ສກ. ຍ້ອນອາໄສເອກະໂວກາຣະພົບ[໑] ຈຶ່ງບັນຍັດບຸກຄົນ ໑ ແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນອາໄສຈະຕຸໂວກາຣະພົບ ຈຶ່ງບັນຍັດບຸກຄົນ ໔ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຍ້ອນອາໄສເອກະໂວກາຣະພົບ ຈຶ່ງບັນຍັດບຸກຄົນ ໑ ແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນອາໄສປັນຈະໂວກາຣະພົບ ຈຶ່ງບັນຍັດບຸກຄົນ ໕ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ໃນເອກະໂວກາຣະພົບມີບຸກຄົນພຽງ ໑ ແມ່ນບໍ?

ປຣ. ແມ່ນ

ສກ. ໃນຈະຕຸໂວກາຣະພົບມີບຸກຄົນພຽງ ໔ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ໃນເອກະໂວກາຣະພົບມີບຸກຄົນພຽງ ໑ ແມ່ນບໍ?

ປຣ. ແມ່ນ

ສກ. ໃນປັນຈະໂວກາຣະພົບມີບຸກຄົນພຽງ ໕ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໑໑໘] ສກ. ຍ້ອນອາໄສຕົ້ນໄມ້ຈຶ່ງບັນຍັດເງົາໄມ້ ສັນໃດ ຍ້ອນອາໄສຮູບຈຶ່ງບັນຍັດບຸກຄົນ ສັນນັ້ນຄືກັນແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນອາໄສຕົ້ນໄມ້ຈຶ່ງບັນຍັດເງົາໄມ້ ແມ່ນຕົ້ນໄມ້ກໍບໍ່ທ່ຽງ ແມ່ນເງົາໄມ້ກໍບໍ່ທ່ຽງ ສັນໃດ ຍ້ອນອາໄສຮູບຈຶ່ງບັນຍັດບຸກຄົນ ແມ່ນຮູບກໍບໍ່ທ່ຽງ ແມ່ນບຸກຄົນກໍບໍ່ທ່ຽງ ສັນນັ້ນຄືກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຍ້ອນອາໄສຕົ້ນໄມ້ຈຶ່ງບັນຍັດເງົາໄມ້ ຕົ້ນໄມ້ກັບເງົາໄມ້ເປັນຄົນລະຢ່າງກັນ ສັນໃດ ຍ້ອນອາໄສຮູບຈຶ່ງບັນຍັດບຸກຄົນ ຮູບກັບບຸກຄົນເປັນຄົນລະຢ່າງກັນ ສັນນັ້ນຄືກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໑໑໑] ສກ. ຍ້ອນອາໄສບ້ານຈຶ່ງບັນຍັດຊາວບ້ານ ສັນໃດ ຍ້ອນອາໄສຮູບຈຶ່ງບັນຍັດບຸກຄົນ ສັນນັ້ນຄືກັນແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນອາໄສບ້ານຈຶ່ງບັນຍັດຊາວບ້ານ ບ້ານກັບຊາວບ້ານເປັນຄົນລະຢ່າງກັນ ສັນໃດ ຍ້ອນອາໄສຮູບຈຶ່ງບັນຍັດບຸກຄົນ ຮູບກັບບຸກຄົນເປັນຄົນລະຢ່າງກັນ ສັນນັ້ນຄືກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໑໑໔] ສກ. ຍ້ອນອາໄສຣັດຈຶ່ງບັນຍັດພຣະຣາຊາສັນໃດ ຍ້ອນອາໄສຮູບຈຶ່ງບັນຍັດບຸກຄົນ ສັນນັ້ນຄືກັນແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນອາໄສຣັດຈຶ່ງບັນຍັດພຣະຣາຊາ ຣັດກັບພຣະຣາຊາເປັນຄົນລະຢ່າງກັນ ສັນໃດ ຍ້ອນອາໄສຮູບຈຶ່ງບັນຍັດບຸກຄົນ ຮູບກັບບຸກຄົນເປັນຄົນລະຢ່າງກັນ ສັນນັ້ນຄືກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໑໕] ສກ. ໄສ້ບໍ່ແມ່ນຜູ້ຖືກມັດໄສ້ ໄສ້ມີແກ່ຜູ້ໃດ ຜູ້ນັ້ນຊື່ວ່າຜູ້ຖືກມັດໄສ້ ສັນໃດ ຮູບບໍ່ແມ່ນຜູ້ມີຮູບ ຮູບມີແກ່ຜູ້ໃດ ຜູ້ນັ້ນຊື່ວ່າຜູ້ມີຮູບ ສັນນັ້ນຄືກັນແມ່ນບໍ?

ປຣ. ແມ່ນ

ສກ. ໄສ້ບໍ່ແມ່ນຜູ້ຖືກມັດໄສ້ ໄສ້ມີແກ່ຜູ້ໃດ ຜູ້ນັ້ນຊື່ວ່າຜູ້ຖືກມັດໄສ້ ໄສ້ກັບຜູ້ຖືກມັດໄສ້ ເປັນຄົນລະຢ່າງກັນ ສັນໃດ ຮູບບໍ່ແມ່ນຜູ້ມີຮູບ ຮູບມີແກ່ຜູ້ໃດ ຜູ້ນັ້ນຊື່ວ່າຜູ້ມີຮູບ ຮູບກັບຜູ້ມີຮູບ ເປັນຄົນລະຢ່າງ ສັນນັ້ນຄືກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໑໖] ສກ. ມີການບັນຍັດບຸກຄົນໃນຈິດແຕ່ລະດວງແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຍ່ອມເກີດ ແກ່ ຕາຍ ຈຸຕິ ປະຕິສົນທິ ໃນຈິດແຕ່ລະດວງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອຈິດດວງທີ ໔ ເກີດຂຶ້ນ ທ່ານບໍ່ຍອມຮັບວ່າ "ເປັນຄົນດຽວກັນຫຼືເປັນຄົນລະຄົນກັນ" ແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອຈິດດວງທີ ໔ ເກີດຂຶ້ນ ທ່ານບໍ່ຍອມຮັບວ່າ "ເປັນເດັກຊາຍຫຼືເປັນເດັກຍິງ" ແມ່ນບໍ?

ປຣ. ຂ້າພະເຈົ້າຍອມຮັບ

ສກ. ທ່ານຈົ່ງຮັບນິກຄະຫະ ດັ່ງຕໍ່ໄປນີ້

ເມື່ອຈິດດວງທີ ໔ ເກີດຂຶ້ນ ຫາກທ່ານບໍ່ຍອມຮັບວ່າ "ເປັນຄົນດຽວກັນຫຼືເປັນຄົນລະຄົນກັນ" ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ເມື່ອຈິດດວງທີ ໔ ເກີດຂຶ້ນ ຂ້າພະເຈົ້າບໍ່ຍອມຮັບວ່າເປັນເດັກຊາຍຫຼືເປັນເດັກຍິງ" ທ່ານກ່າວຄຳຂັດແຍ່ງໃດໃນຕອນຕົ້ນນັ້ນວ່າ "ຂ້າພະເຈົ້າຍອມຮັບວ່າ ເມື່ອຈິດດວງທີ ໔ ເກີດຂຶ້ນ ຂ້າພະເຈົ້າບໍ່ຍອມຮັບວ່າ "ເປັນຄົນດຽວກັນຫຼືເປັນຄົນລະຄົນກັນ" ເມື່ອຈິດດວງທີ ໔ ເກີດຂຶ້ນ ຂ້າພະເຈົ້າຈຶ່ງຍອມຮັບວ່າ ເປັນເດັກຊາຍຫຼືເປັນເດັກຍິງ" ຄຳນັ້ນຂອງທ່ານຜິດ

ອັນໜຶ່ງ ເມື່ອຈິດດວງທີ ໔ ເກີດຂຶ້ນ ຫາກທ່ານຍອມຮັບວ່າ "ເປັນເດັກຊາຍຫຼືເປັນເດັກຍິງ" ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ເມື່ອຈິດດວງທີ ໔ ເກີດຂຶ້ນ ຂ້າພະເຈົ້າຍອມຮັບວ່າເປັນຄົນດຽວກັນຫຼືເປັນຄົນລະຄົນກັນ" ທ່ານກ່າວຄຳຂັດແຍ່ງໃດໃນຕອນຕົ້ນນັ້ນວ່າ "ຂ້າພະເຈົ້າ

ຍອມຮັບວ່າ ເມື່ອຈິດດວງທີ ໔ ເກີດຂຶ້ນ ຂ້າພະເຈົ້າບໍ່ຍອມຮັບວ່າ "ເປັນຄົນດຽວກັນຫຼືເປັນຄົນລະຄົນກັນ" ເມື່ອຈິດດວງທີ ໔ ເກີດຂຶ້ນ ຂ້າພະເຈົ້າຈຶ່ງຍອມຮັບວ່າ ເປັນເດັກຊາຍຫຼືເປັນເດັກຍິງ" ຄຳນັ້ນຂອງທ່ານຜິດ

[໑໑ກ] ສກ. ເມື່ອຈິດດວງທີ ໔ ເກີດຂຶ້ນ ທ່ານບໍ່ຍອມຮັບວ່າ "ເປັນຄົນດຽວກັນຫຼືເປັນຄົນລະຄົນກັນ" ແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອຈິດດວງທີ ໔ ເກີດຂຶ້ນ ທ່ານບໍ່ຍອມຮັບວ່າ "ເປັນສະຕີຫຼືເປັນບຸຣຸດ ເປັນຄະລືຫັດຫຼືເປັນບັນພະຊິດ ເປັນເທວະດາຫຼືເປັນມະນຸດ" ແມ່ນບໍ?

ປຣ. ຂ້າພະເຈົ້າຍອມຮັບ

ສກ. ທ່ານຈົ່ງຮັບນິກຄະຫະ ດັ່ງຕໍ່ໄປນີ້

ຫາກເມື່ອຈິດດວງທີ ໔ ເກີດຂຶ້ນ ທ່ານບໍ່ຍອມຮັບວ່າ "ເປັນຄົນດຽວກັນຫຼືເປັນຄົນລະຄົນກັນ" ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ເມື່ອຈິດດວງທີ ໔ ເກີດຂຶ້ນ ຂ້າພະເຈົ້າບໍ່ຍອມຮັບວ່າ ເປັນເທວະດາຫຼືເປັນມະນຸດ" ທ່ານກ່າວຄຳຂັດແຍ່ງໃດໃນຕອນຕົ້ນນັ້ນວ່າ "ຂ້າພະເຈົ້າຍອມຮັບວ່າ ເມື່ອຈິດດວງທີ ໔ ເກີດຂຶ້ນ ຂ້າພະເຈົ້າບໍ່ຍອມຮັບວ່າ "ເປັນຄົນດຽວກັນຫຼືເປັນຄົນລະຄົນກັນ" ເມື່ອຈິດດວງທີ ໔ ເກີດຂຶ້ນ ຂ້າພະເຈົ້າຈຶ່ງຍອມຮັບວ່າ ເປັນເທວະດາຫຼືເປັນມະນຸດ" ຄຳນັ້ນຂອງທ່ານຜິດ

ອັນໜຶ່ງ ເມື່ອຈິດດວງທີ ໔ ເກີດຂຶ້ນ ຫາກທ່ານຍອມຮັບວ່າ "ເປັນເທວະດາຫຼືເປັນມະນຸດ" ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ເມື່ອຈິດດວງທີ ໔ ເກີດຂຶ້ນ ຂ້າພະເຈົ້າຍອມຮັບວ່າ ເປັນຄົນດຽວກັນຫຼືວ່າເປັນຄົນລະຄົນກັນ" ທ່ານກ່າວຄຳຂັດແຍ່ງໃດໃນຕອນຕົ້ນນັ້ນວ່າ "ຂ້າພະເຈົ້າຍອມຮັບວ່າ ເມື່ອຈິດດວງທີ ໔ ເກີດຂຶ້ນ ຂ້າພະເຈົ້າບໍ່ຍອມຮັບວ່າ "ເປັນຄົນດຽວກັນຫຼືວ່າເປັນຄົນລະຄົນກັນ ເມື່ອຈິດດວງທີ ໔ ເກີດຂຶ້ນ ຂ້າພະເຈົ້າຈຶ່ງຍອມຮັບວ່າ ເປັນເທວະດາຫຼືເປັນມະນຸດ" ຄຳນັ້ນຂອງທ່ານຜິດ ໗ລ໗

[໑໑ຂ] ປຣ. ທ່ານບໍ່ຍອມຮັບວ່າ "ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ" ແມ່ນບໍ?

ສກ. ແມ່ນ

ປຣ. ບຸກຄົນໃດເຫັນ ເຫັນຮູບໃດ ເຫັນດ້ວຍຈັກຂຸໃດ ບຸກຄົນນັ້ນເຫັນ ເຫັນຮູບນັ້ນ ເຫັນດ້ວຍຈັກຂຸນັ້ນບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກບຸກຄົນໃດເຫັນ ເຫັນຮູບໃດ ເຫັນດ້ວຍຈັກຂຸໃດ ບຸກຄົນນັ້ນເຫັນ ເຫັນຮູບນັ້ນເຫັນດ້ວຍຈັກຂຸນັ້ນ ດັ່ງນັ້ນ ທ່ານຈຶ່ງຍອມຮັບວ່າ "ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ"

[໑໑໙] ປຣ. ທ່ານບໍ່ຍອມຮັບວ່າ “ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ” ແມ່ນບໍ?

ສກ. ແມ່ນ

ປຣ. ບຸກຄົນໃດຟັງ ຯລຯ ບຸກຄົນໃດດົມ ຯລຯ ບຸກຄົນໃດຊີມຣົດ ຯລຯ ບຸກຄົນໃດຖືກຕ້ອງ ຯລຯ ບຸກຄົນໃດຮູ້ ຮູ້ທຳມາຣົມໃດ ຮູ້ດ້ວຍມະໂນໃດ ບຸກຄົນນັ້ນຮູ້ ຮູ້ທຳມາຣົມນັ້ນ ຮູ້ດ້ວຍມະໂນນັ້ນບໍ່ ແມ່ນບໍ?

ສກ. ແມ່ນ

ປຣ. ຫາກບຸກຄົນໃດຮູ້ ຮູ້ທຳມາຣົມໃດ ຮູ້ດ້ວຍມະໂນໃດ ບຸກຄົນນັ້ນຮູ້ ຮູ້ທຳມາຣົມນັ້ນ ຮູ້ດ້ວຍມະໂນນັ້ນ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ “ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ”

[໑໘໐] ສກ. ທ່ານຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນໃດບໍ່ເຫັນ ບໍ່ເຫັນຮູບໃດ ບໍ່ເຫັນດ້ວຍຈັກຂຸໃດ ບຸກຄົນນັ້ນບໍ່ເຫັນ ບໍ່ເຫັນຮູບນັ້ນ ບໍ່ເຫັນດ້ວຍຈັກຂຸນັ້ນ ແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນໃດບໍ່ເຫັນ ບໍ່ເຫັນຮູບໃດ ບໍ່ເຫັນດ້ວຍຈັກຂຸໃດ ບຸກຄົນນັ້ນບໍ່ເຫັນ ບໍ່ເຫັນຮູບນັ້ນ ບໍ່ເຫັນດ້ວຍຈັກຂຸນັ້ນ ທ່ານກໍບໍ່ຄວນຍອມຮັບວ່າ “ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ”

ສກ. ທ່ານຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນໃດບໍ່ຟັງ ຯລຯ ບຸກຄົນໃດບໍ່ດົມ ຯລຯ ບຸກຄົນໃດບໍ່ຊີມຣົດ ຯລຯ ບຸກຄົນໃດບໍ່ຖືກຕ້ອງ ຯລຯ ບຸກຄົນໃດບໍ່ຮູ້ ບໍ່ຮູ້ທຳມາຣົມໃດ ບໍ່ຮູ້ດ້ວຍມະໂນໃດ ບຸກຄົນນັ້ນບໍ່ຮູ້ ບໍ່ຮູ້ທຳມາຣົມນັ້ນ ບໍ່ຮູ້ດ້ວຍມະໂນນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນໃດບໍ່ຮູ້ ບໍ່ຮູ້ທຳມາຣົມໃດ ບໍ່ຮູ້ດ້ວຍມະໂນໃດ ບຸກຄົນນັ້ນບໍ່ຮູ້ ບໍ່ຮູ້ທຳມາຣົມນັ້ນ ບໍ່ຮູ້ດ້ວຍມະໂນນັ້ນ ທ່ານກໍບໍ່ຄວນຍອມຮັບວ່າ “ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ”

[໑໘໑] ປຣ. ທ່ານບໍ່ຍອມຮັບວ່າ “ທ່ານຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ” ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ເຮົາເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງປະຕິສົນທິ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍທິບພະຈັກຂຸອັນບໍລິສຸດເໜືອມະນຸດ ຮູ້ຊັດແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳ" ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ຂ້າພະເຈົ້າຈຶ່ງຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ

[໑໘໘] ສກ. ຍ້ອນທ່ານເຂົ້າໃຈວ່າ "ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ເຮົາເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງປະຕິສົນທິ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍທິບພະຈັກຂຸອັນບໍລິສຸດເໜືອມະນຸດ ຮູ້ຊັດແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳ" ຈຶ່ງຍອມຮັບວ່າ "ຂ້າພະເຈົ້າຈຶ່ງຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ" ແມ່ນບໍ?

ປຣ. ແມ່ນ

ສກ. ພຣະຜູ້ມີພຣະພາກເຈົ້າຊົງເຫັນຮູບ ຫຼືຊົງເຫັນບຸກຄົນໄດ້ດ້ວຍທິບພະຈັກຂຸອັນບໍລິສຸດເໜືອມະນຸດ

ປຣ. ຊົງເຫັນຮູບ

ສກ. ຮູບເປັນບຸກຄົນ ຮູບຈຸຕິ ຮູບປະຕິສົນທິ ຮູບເປັນໄປຕາມກຳແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ພຣະຜູ້ມີພຣະພາກເຈົ້າຊົງເຫັນຮູບ ຫຼືຊົງເຫັນບຸກຄົນໄດ້ດ້ວຍທິບພະຈັກຂຸອັນບໍລິສຸດ ເໜືອມະນຸດ

ປຣ. ຊົງເຫັນບຸກຄົນ

ສກ. ບຸກຄົນເປັນຮູບ ເປັນຮູປາຍະຕະນະ ເປັນຮູບທາດ ເປັນສີຂຽວ ສີເຫຼືອງ ສີແດງ ສີຂາວ ສິ່ງທີ່ຈະຮູ້ໄດ້ທາງຈັກຂຸ ກະທົບທີ່ຈັກຂຸ ມາສູ່ຄອງຈັກຂຸໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ພຣະຜູ້ມີພຣະພາກເຈົ້າຊົງເຫັນຮູບ ຫຼື ຊົງເຫັນບຸກຄົນໄດ້ດ້ວຍທິບພະຈັກຂຸອັນບໍລິສຸດ ເໜືອມະນຸດ

ປຣ. ຊົງເຫັນໄດ້ທັງ ໒ ຢ່າງ

ສກ. ທັງ ໒ ຢ່າງ ເປັນຮູບ ເປັນຮູປາຍະຕະນະ ເປັນຮູບທາດ ທັງ ໒ ຢ່າງເປັນສີຂຽວ ທັງ ໒ ຢ່າງເປັນສີເຫຼືອງ ທັງ ໒ ຢ່າງເປັນສີແດງ ທັງ ໒ ຢ່າງເປັນສີຂາວ ທັງ ໒ ຢ່າງເປັນສິ່ງທີ່ຈະຮູ້ໄດ້ທາງຈັກຂຸ ທັງ ໒ ຢ່າງກະທົບທີ່ຈັກຂຸ ທັງ ໒ ຢ່າງມາສູ່ຄອງຈັກຂຸ ທັງ ໒ ຢ່າງຈຸຕິ ທັງ ໒ ຢ່າງປະຕິສົນທິ ທັງ ໒ ຢ່າງເປັນໄປຕາມກຳແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

**ອຸປາທາປັນຍັດຕານຸໂຍຄະ ຈົບ**

## ໑໓. ປຸຣິສະກາຣານຸໂຍຄະ

## ວ່າດ້ວຍການຊັກຖາມເຖິງຜູ້ກະທຳ

[໑໔໓] ປຣ. ທ່ານຍັ່ງຮູ້ກຳດີແລະກຳຊົ່ວໄດ້ແມ່ນບໍ?

ສກ. ແມ່ນ

ປຣ. ທ່ານຍັ່ງຮູ້ບຸກຄົນຜູ້ເຮັດ ຜູ້ສັ່ງໃຫ້ເຮັດກຳດີແລະກຳຊົ່ວໄດ້ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໔໔] ສກ. ທ່ານຍັ່ງຮູ້ກຳດີແລະກຳຊົ່ວໄດ້ ຍ້ອນເຫດນັ້ນ ຈຶ່ງຍັ່ງຮູ້ບຸກຄົນຜູ້ເຮັດ ຜູ້ສັ່ງໃຫ້ເຮັດກຳດີ ແລະກຳຊົ່ວໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທ່ານຍັ່ງຮູ້ບຸກຄົນຜູ້ສ້າງ ຜູ້ສັ່ງໃຫ້ສ້າງເຊິ່ງບຸກຄົນຜູ້ເຮັດຜູ້ສັ່ງໃຫ້ເຮັດທັງ ໔ ນັ້ນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໔໕] ສກ. ທ່ານຍັ່ງຮູ້ບຸກຄົນຜູ້ສ້າງ ຜູ້ສັ່ງໃຫ້ສ້າງເຊິ່ງບຸກຄົນຜູ້ເຮັດຜູ້ສັ່ງໃຫ້ເຮັດນັ້ນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ການເຮັດບ່ອນສຸດທຸກບໍ່ມີ ການຕັດຂາດວັດຕະບໍ່ມີ ອະນຸປາທາປະຣິນິບພານກໍບໍ່ມີແກ່ບຸກຄົນຜູ້ບັນດານ ຜູ້ສັ່ງໃຫ້ບັນດານເຊິ່ງບຸກຄົນທັງ ໔ ຊັ້ນດັ່ງກ່າວມານັ້ນ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໔໖] ສກ. ທ່ານຍັ່ງຮູ້ກຳດີແລະກຳຊົ່ວໄດ້ ຍ້ອນເຫດນັ້ນ ຈຶ່ງຍັ່ງຮູ້ບຸກຄົນຜູ້ເຮັດ ຜູ້ສັ່ງໃຫ້ເຮັດກຳດີແລະກຳຊົ່ວໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທ່ານຍັ່ງຮູ້ບຸກຄົນໄດ້ ຍ້ອນເຫດນັ້ນ ຈຶ່ງຍັ່ງຮູ້ບຸກຄົນຜູ້ເຮັດ ຜູ້ສັ່ງໃຫ້ເຮັດບຸກຄົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໔໗] ສກ. ທ່ານຍັ່ງຮູ້ກຳດີແລະກຳຊົ່ວໄດ້ ຍ້ອນເຫດນັ້ນ ຈຶ່ງຍັ່ງຮູ້ບຸກຄົນຜູ້ເຮັດ ຜູ້ສັ່ງໃຫ້ເຮັດກຳດີ ແລະກຳຊົ່ວໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທ່ານຢັ່ງຮູ້ນິບພານໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ເຮັດ ຜູ້ສັ່ງໃຫ້ເຮັດນິບພານໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໑໘໗] ສກ. ທ່ານຢັ່ງຮູ້ກໍາດີແລະກໍາຊົ່ວໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ເຮັດ ຜູ້ສັ່ງໃຫ້ເຮັດກໍາດີແລະກໍາຊົ່ວໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທ່ານຢັ່ງຮູ້ມະຫາປະຖະພີໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ເຮັດ ຜູ້ສັ່ງໃຫ້ເຮັດມະຫາປະຖະພີ ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໑໘໙] ສກ. ທ່ານຢັ່ງຮູ້ກໍາດີແລະກໍາຊົ່ວໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ເຮັດ ຜູ້ສັ່ງໃຫ້ເຮັດກໍາດີແລະກໍາຊົ່ວໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທ່ານຢັ່ງຮູ້ມະຫາສະມຸດໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ເຮັດ ຜູ້ສັ່ງໃຫ້ເຮັດມະຫາສະມຸດໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໑໙໐] ສກ. ທ່ານຢັ່ງຮູ້ກໍາດີແລະກໍາຊົ່ວໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ເຮັດຜູ້ສັ່ງໃຫ້ເຮັດກໍາດີແລະກໍາຊົ່ວໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທ່ານຢັ່ງຮູ້ພູເຂົາສິເນຣຸໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ເຮັດ ຜູ້ສັ່ງໃຫ້ເຮັດພູເຂົາສິເນຣຸໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໑໙໑] ສກ. ທ່ານຢັ່ງຮູ້ກໍາດີແລະກໍາຊົ່ວໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ເຮັດ ຜູ້ສັ່ງໃຫ້ເຮັດກໍາດີແລະກໍາຊົ່ວໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທ່ານຢັ່ງຮູ້ນໍ້າໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ເຮັດ ຜູ້ສັ່ງໃຫ້ເຮັດນໍ້າໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໑໙໒] ສກ. ທ່ານຢັ່ງຮູ້ກໍາດີແລະກໍາຊົ່ວໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ເຮັດຜູ້ສັ່ງໃຫ້ເຮັດກໍາດີແລະກໍາຊົ່ວໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທ່ານຢັ່ງຮູ້ໄຟໄດ້ ຍ້ອນເຫດນັ້ນຈຶ່ງຢັ່ງຮູ້ບຸກຄົນຜູ້ເຮັດຜູ້ສັ່ງໃຫ້ເຮັດໄຟໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໕໓] ສກ. ທ່ານຢັ່ງຮູ້ກໍາດີແລະກໍາຊົ່ວໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ເຮັດຜູ້ສັ່ງໃຫ້ເຮັດກໍາດີແລະກໍາຊົ່ວໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທ່ານຢັ່ງຮູ້ລົມໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໕໔] ສກ. ທ່ານຢັ່ງຮູ້ກໍາດີແລະກໍາຊົ່ວໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ເຮັດຜູ້ສັ່ງໃຫ້ເຮັດກໍາດີແລະກໍາຊົ່ວໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທ່ານຢັ່ງຮູ້ຫຍ້າ ໄມ້ ແລະຕົ້ນໄມ້ເຈົ້າປ່າໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ເຮັດຜູ້ສັ່ງໃຫ້ເຮັດຫຍ້າ ໄມ້ ແລະຕົ້ນໄມ້ເຈົ້າປ່າໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໕໕] ສກ. ທ່ານຢັ່ງຮູ້ກໍາດີແລະກໍາຊົ່ວໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ເຮັດ ຜູ້ສັ່ງໃຫ້ເຮັດກໍາດີແລະກໍາຊົ່ວໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ກໍາດີແລະກໍາຊົ່ວກັບບຸກຄົນຜູ້ເຮັດຜູ້ສັ່ງໃຫ້ເຮັດກໍາດີ ແລະກໍາຊົ່ວເປັນຄົນລະຢ່າງກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໕໖] ປຣ. ທ່ານຢັ່ງຮູ້ວິບາກຂອງກໍາດີແລະກໍາຊົ່ວໄດ້ແມ່ນບໍ?

ສກ. ແມ່ນ

ປຣ. ທ່ານຢັ່ງຮູ້ບຸກຄົນຜູ້ສະເຫວີຍ (ໄດ້ຮັບ) ວິບາກຂອງກໍາດີແລະກໍາຊົ່ວໄດ້ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໕໗] ສກ. ທ່ານຢັ່ງຮູ້ວິບາກຂອງກໍາດີແລະກໍາຊົ່ວໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ ບຸກຄົນຜູ້ສະເຫວີຍວິບາກຂອງກໍາດີ ແລະກໍາຊົ່ວໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທ່ານຢັ່ງຮູ້ບຸກຄົນຜູ້ສະເຫວີຍເຊິ່ງບຸກຄົນຜູ້ສະເຫວີຍວິບາກນັ້ນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໓໗] ສກ. ທ່ານຢັ່ງຮູ້ບຸກຄົນຜູ້ສະເຫວີຍເຊິ່ງບຸກຄົນຜູ້ສະເຫວີຍວິບາກນັ້ນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ການເຮັດບ່ອນສຸດແຫ່ງທຸກບໍ່ມີ ການຕັດຂາດວັດຕະບໍ່ມີ ອະນຸປາທາປະຣິນິບພານກໍບໍ່ມີແກ່ບຸກຄົນຜູ້ສະເຫວີຍເຊິ່ງບຸກຄົນຜູ້ສະເຫວີຍທັງ ໔ ຊັ້ນດັ່ງກ່າວມານັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໓໙] ສກ. ທ່ານຢັ່ງຮູ້ວິບາກຂອງກຳດີແລະກຳຊົ່ວໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ສະເຫວີຍວິບາກຂອງກຳດີ ແລະກຳຊົ່ວໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທ່ານຢັ່ງຮູ້ບຸກຄົນໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ສະເຫວີຍບຸກຄົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໔໐] ສກ. ທ່ານຢັ່ງຮູ້ວິບາກຂອງກຳດີແລະກຳຊົ່ວໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ສະເຫວີຍວິບາກຂອງກຳດີແລະກຳຊົ່ວໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທ່ານຢັ່ງຮູ້ນິບພານໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ສະເຫວີຍນິບພານໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໔໑] ສກ. ທ່ານຢັ່ງຮູ້ວິບາກຂອງກຳດີແລະກຳຊົ່ວໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ສະເຫວີຍວິບາກຂອງກຳດີແລະກຳຊົ່ວໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທ່ານຢັ່ງຮູ້ມະຫາປະຖະພີ ຯລຯ ຢັ່ງຮູ້ມະຫາສະມຸດ ຯລຯ ຢັ່ງຮູ້ພູເຂົາສິເນຣຸ ຯລຯ ຢັ່ງຮູ້ນ້ຳ ຯລຯ ຢັ່ງຮູ້ໄຟ ຯລຯ ຢັ່ງຮູ້ລົມ ຯລຯ ຢັ່ງຮູ້ຫຍ້າ ໄມ້ ແລະຕົ້ນໄມ້ເຈົ້າປ່າໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ສະເຫວີຍຫຍ້າ ໄມ້ ແລະຕົ້ນໄມ້ເຈົ້າປ່າໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໔໔] ສກ. ທ່ານຢັ່ງຮູ້ວິບາກຂອງກຳດີແລະກຳຊົ່ວໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ສະເຫວີຍວິບາກຂອງກຳດີ ແລະກຳຊົ່ວໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ວິບາກຂອງກຳດີ ແລະກຳຊົ່ວກັບບຸກຄົນຜູ້ສະເຫວີຍວິບາກຂອງກຳດີ ແລະກຳຊົ່ວເປັນຄົນລະຢ່າງກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໘໓] ປຣ. ທ່ານຢັ່ງຮູ້ທີບພະສຸກໄດ້ແມ່ນບໍ?

ສກ. ແມ່ນ

ປຣ. ທ່ານຢັ່ງຮູ້ບຸກຄົນຜູ້ສະເຫວີຍທີບພະສຸກໄດ້ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ฯລฯ

[໑໘໔] ສກ. ທ່ານຢັ່ງຮູ້ທີບພະສຸກໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ສະເຫວີຍທີບພະສຸກ ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທ່ານຢັ່ງຮູ້ບຸກຄົນຜູ້ສະເຫວີຍເຊິ່ງບຸກຄົນຜູ້ສະເຫວີຍທີບພະສຸກນັ້ນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໑໘໕] ສກ. ທ່ານຢັ່ງຮູ້ບຸກຄົນຜູ້ສະເຫວີຍ ບຸກຄົນຜູ້ສະເຫວີຍທີບພະສຸກນັ້ນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ການເຮັດບ່ອນສຸດແຫ່ງທຸກບໍ່ມີ ການຕັດຂາດວັດຕະບໍ່ມີ ອະນຸປາທາປະຣິນິບພານກໍບໍ່ມີແກ່ບຸກຄົນຜູ້ສະເຫວີຍເຊິ່ງບຸກຄົນຜູ້ສະເຫວີຍທັງ ໔ ຊັ້ນດັ່ງກ່າວມານັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໑໘໖] ສກ. ທ່ານຢັ່ງຮູ້ທີບພະສຸກໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ສະເຫວີຍທີບພະສຸກ ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທ່ານຢັ່ງຮູ້ບຸກຄົນໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ສະເຫວີຍບຸກຄົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໑໘໗] ສກ. ທ່ານຢັ່ງຮູ້ທີບພະສຸກໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ສະເຫວີຍທີບພະສຸກ ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທ່ານຢັ່ງຮູ້ນິບພານໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ຜູ້ສະເຫວີຍນິບພານໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໑໘໘] ສກ. ທ່ານຢັ່ງຮູ້ທີບພະສຸກໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ສະເຫວີຍທີບພະສຸກ ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທ່ານຢັ່ງຮູ້ມະຫາປະຖະພີ ຯລຯ ຢັ່ງຮູ້ມະຫາສະມຸດ ຯລຯ ຢັ່ງຮູ້ພູເຂົາສິເນຣຸ ຯລຯ ຢັ່ງຮູ້ນ້ຳ ຯລຯ ຢັ່ງຮູ້ໄຟ ຯລຯ ຢັ່ງຮູ້ລົມ ຯລຯ ຢັ່ງຮູ້ຫຍ້າ ໄມ້ ແລະຕົ້ນໄມ້ເຈົ້າປ່າໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ສະເຫວີຍຫຍ້າ ໄມ້ ແລະຕົ້ນໄມ້ເຈົ້າປ່າໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໔໙] ສກ. ທ່ານຢັ່ງຮູ້ທິບພະສຸກໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ສະເຫວີຍທິບພະສຸກໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທິບພະສຸກກັບບຸກຄົນຜູ້ສະເຫວີຍທິບພະສຸກເປັນຄົນລະຢ່າງກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໕໐] ປຣ. ທ່ານຢັ່ງຮູ້ສຸກຂອງມະນຸດໄດ້ແມ່ນບໍ?

ສກ. ແມ່ນ

ປຣ. ທ່ານຢັ່ງຮູ້ບຸກຄົນຜູ້ສະເຫວີຍສຸກຂອງມະນຸດໄດ້ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໕໑] ສກ. ທ່ານຢັ່ງຮູ້ສຸກຂອງມະນຸດໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ສະເຫວີຍສຸກຂອງມະນຸດໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທ່ານຢັ່ງຮູ້ບຸກຄົນຜູ້ສະເຫວີຍເຊິ່ງບຸກຄົນຜູ້ສະເຫວີຍສຸກນັ້ນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໕໔] ສກ. ທ່ານຢັ່ງຮູ້ບຸກຄົນຜູ້ສະເຫວີຍເຊິ່ງບຸກຄົນຜູ້ສະເຫວີຍສຸກຂອງມະນຸດນັ້ນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ການເຮັດບ່ອນສຸດແຫ່ງທຸກບໍ່ມີ ການຕັດຂາດວັດຕະບໍ່ມີ ອະນຸປາທາປະຣິນິບພານກໍບໍ່ມີແກ່ບຸກຄົນຜູ້ສະເຫວີຍເຊິ່ງບຸກຄົນຜູ້ສະເຫວີຍທັງ ໔ ຊັ້ນດັ່ງກ່າວມານັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໕໓] ສກ. ທ່ານຢັ່ງຮູ້ສຸກຂອງມະນຸດໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ສະເຫວີຍສຸກຂອງບຸກຄົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທ່ານຢັ່ງຮູ້ບຸກຄົນໄດ້ ຍ້ອນເຫດນັ້ນຈຶ່ງຢັ່ງຮູ້ບຸກຄົນຜູ້ສະເຫວີຍເຊິ່ງບຸກຄົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໕໔] ສກ. ທ່ານຢັ່ງຮູ້ສຸກຂອງມະນຸດໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ສະເຫວີຍສຸກຂອງມະນຸດໄດ້ ແມ່ນບໍ?

ປຣ. ແມ່ນ

ສກ. ທ່ານຢັ່ງຮູ້ນິບພານໄດ້ ຍ້ອນເຫດນັ້ນຈຶ່ງຢັ່ງຮູ້ບຸກຄົນຜູ້ສະເຫວີຍນິບພານໄດ້ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໑໕໕] ສກ. ທ່ານຢັ່ງຮູ້ສຸກຂອງມະນຸດໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ສະເຫວີຍສຸກຂອງມະນຸດໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທ່ານຢັ່ງຮູ້ມະຫາປະຖະພີ ฯລฯ ຢັ່ງຮູ້ມະຫາສະມຸດ ฯລฯ ຢັ່ງຮູ້ພູເຂົາສິເນຣຸ ฯລฯ ຢັ່ງຮູ້ນ້ຳ ฯລฯ ຢັ່ງຮູ້ໄຟ ฯລฯ ຢັ່ງຮູ້ລົມ ฯລฯ ຢັ່ງຮູ້ຫຍ້າ ໄມ້ ແລະຕົ້ນໄມ້ເຈົ້າປ່າໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ສະເຫວີຍຫຍ້າ ໄມ້ ແລະຕົ້ນໄມ້ເຈົ້າປ່າໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໑໕໖] ສກ. ທ່ານຢັ່ງຮູ້ສຸກຂອງມະນຸດໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ສະເຫວີຍສຸກຂອງມະນຸດໄດ້ ແມ່ນບໍ?

ປຣ. ແມ່ນ

ສກ. ສຸກຂອງມະນຸດກັບບຸກຄົນຜູ້ສະເຫວີຍສຸກຂອງມະນຸດ ເປັນຄົນລະຢ່າງກັນ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໑໕໗] ປຣ. ທ່ານຢັ່ງຮູ້ທຸກທີ່ມີໃນອະບາຍໄດ້ແມ່ນບໍ?

ສກ. ແມ່ນ

ປຣ. ທ່ານຢັ່ງຮູ້ບຸກຄົນຜູ້ສະເຫວີຍທຸກທີ່ມີໃນອະບາຍໄດ້ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ฯລฯ

[໑໕໘] ສກ. ທ່ານຢັ່ງຮູ້ທຸກທີ່ມີໃນອະບາຍໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ຜູ້ສະເຫວີຍທຸກທີ່ມີໃນອະບາຍໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທ່ານຢັ່ງຮູ້ບຸກຄົນຜູ້ສະເຫວີຍເຊິ່ງບຸກຄົນຜູ້ສະເຫວີຍທຸກນັ້ນໄດ້ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໑໕໙] ສກ. ທ່ານຢັ່ງຮູ້ບຸກຄົນຜູ້ສະເຫວີຍເຊິ່ງບຸກຄົນຜູ້ສະເຫວີຍທຸກນັ້ນໄດ້ ແມ່ນບໍ?

ປຣ. ແມ່ນ

ສກ. ການເຮັດບ່ອນສຸດແຫ່ງທຸກບໍ່ມີ ການຕັດຂາດວັດຕະກໍາບໍ່ມີ ອະນຸປາທາປະຣິນິບພານກໍບໍ່ມີແກ່ບຸກຄົນຜູ້ສະເຫວີຍເຊິ່ງບຸກຄົນຜູ້ສະເຫວີຍທັງ ໘ ຊັ້ນດັ່ງກ່າວມານັ້ນ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໗໐] ສກ. ທ່ານຢັ່ງຮູ້ທຸກທີ່ມີໃນອະບາຍໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ສະເຫວີຍທຸກທີ່ມີໃນອະບາຍໄດ້ ແມ່ນບໍ?

ປຣ. ແມ່ນ

ສກ. ທ່ານຢັ່ງຮູ້ບຸກຄົນໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ສະເຫວີຍບຸກຄົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໗໑] ສກ. ທ່ານຢັ່ງຮູ້ທຸກທີ່ມີໃນອະບາຍໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ສະເຫວີຍທຸກທີ່ມີໃນອະບາຍໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທ່ານຢັ່ງຮູ້ນິບພານໄດ້ ຍ້ອນເຫດນັ້ນຈຶ່ງຢັ່ງຮູ້ບຸກຄົນຜູ້ສະເຫວີຍນິບພານໄດ້ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໗໒] ສກ. ທ່ານຢັ່ງຮູ້ທຸກທີ່ມີໃນອະບາຍໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ສະເຫວີຍທຸກທີ່ມີໃນອະບາຍໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທ່ານຢັ່ງຮູ້ມະຫາປະຖະພີ ຯລຯ ຢັ່ງຮູ້ມະຫາສະມຸດ ຯລຯ ຢັ່ງຮູ້ພູເຂົາສິເນຣຸ ຯລຯ ຢັ່ງຮູ້ນ້ຳ ຯລຯ ຢັ່ງຮູ້ໄຟ ຯລຯ ຢັ່ງຮູ້ລົມ ຯລຯ ຢັ່ງຮູ້ຫຍ້າ ໄມ້ ແລະຕົ້ນໄມ້ເຈົ້າປ່າໄດ້ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ສະເຫວີຍຫຍ້າ ໄມ້ ແລະຕົ້ນໄມ້ເຈົ້າປ່າໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໗໓] ສກ. ທ່ານຢັ່ງຮູ້ທຸກທີ່ມີໃນອະບາຍໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ສະເຫວີຍທຸກທີ່ມີໃນອະບາຍໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທຸກທີ່ມີໃນອະບາຍກັບບຸກຄົນ ຜູ້ສະເຫວີຍທຸກທີ່ມີໃນອະບາຍເປັນຄົນລະຢ່າງກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໗໔] ປຣ. ທ່ານຢັ່ງຮູ້ທຸກທີ່ມີໃນນະຣົກໄດ້ແມ່ນບໍ?

ສກ. ແມ່ນ

ປຣ. ທ່ານຢັ່ງຮູ້ບຸກຄົນຜູ້ສະເຫວີຍທຸກທີ່ມີໃນນະຣົກໄດ້ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ທ່ານຢັ່ງຮູ້ທຸກທີ່ມີໃນນະຣົກໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ສະເຫວີຍທຸກທີ່ມີໃນນະຣົກໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທ່ານຢັ່ງຮູ້ບຸກຄົນຜູ້ສະເຫວີຍເຊິ່ງບຸກຄົນຜູ້ສະເຫວີຍທຸກນັ້ນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໖໕] ສກ. ທ່ານຢັ່ງຮູ້ບຸກຄົນຜູ້ສະເຫວີຍເຊິ່ງບຸກຄົນຜູ້ສະເຫວີຍທຸກນັ້ນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ການເຮັດບ່ອນສຸດທຸກບໍ່ມີ ການຕັດຂາດວັດຕະບໍ່ມີ ອະນຸປາທາປະຣິນິບພານກໍບໍ່ມີແກ່ບຸກຄົນຜູ້ສະເຫວີຍເຊິ່ງບຸກຄົນຜູ້ສະເຫວີຍທັງ ໔ ຊັ້ນດັ່ງກ່າວມານັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໖໖] ສກ. ທ່ານຢັ່ງຮູ້ທຸກທີ່ມີໃນນະຣົກໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ຜູ້ສະເຫວີຍທຸກທີ່ມີໃນນະຣົກໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທ່ານຢັ່ງຮູ້ບຸກຄົນໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ຜູ້ສະເຫວີຍບຸກຄົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໖໗] ສກ. ທ່ານຢັ່ງຮູ້ທຸກທີ່ມີໃນນະຣົກໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ສະເຫວີຍທຸກທີ່ມີໃນນະຣົກໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທ່ານຢັ່ງຮູ້ນິບພານໄດ້ ຍ້ອນເຫດນັ້ນຈຶ່ງຢັ່ງຮູ້ບຸກຄົນຜູ້ສະເຫວີຍນິບພານໄດ້ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໖໘] ສກ. ທ່ານຢັ່ງຮູ້ທຸກທີ່ມີໃນນະຣົກໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ສະເຫວີຍທຸກທີ່ມີໃນນະຣົກໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທ່ານຢັ່ງຮູ້ມະຫາປະຖະພີ ຯລຯ ຢັ່ງຮູ້ມະຫາສະມຸດ ຯລຯ ຢັ່ງຮູ້ພູເຂົາສິເນຣຸ ຯລຯ ຢັ່ງຮູ້ນ້ຳ ຯລຯ ຢັ່ງຮູ້ໄຟ ຯລຯ ຢັ່ງຮູ້ລົມ ຯລຯ ຢັ່ງຮູ້ຫຍ້າ ໄມ້ ແລະຕົ້ນໄມ້ເຈົ້າປ່າໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ສະເຫວີຍຫຍ້າ ໄມ້ ແລະຕົ້ນໄມ້ເຈົ້າປ່າໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໖໙] ສກ. ທ່ານຢັ່ງຮູ້ທຸກທີ່ມີໃນນະຮົກໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ສະເຫວີຍທຸກທີ່ມີໃນນະຮົກໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທຸກທີ່ມີໃນນະຮົກກັບບຸກຄົນຜູ້ສະເຫວີຍທຸກທີ່ມີໃນນະຮົກເປັນຄົນລະຢ່າງກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໗໐] ສກ. ທ່ານຢັ່ງຮູ້ກຳດີແລະກຳຊົ່ວໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ເຮັດ ຜູ້ສັ່ງໃຫ້ເຮັດ ຜູ້ສະເຫວີຍວິບາກຂອງກຳດີແລະກຳຊົ່ວໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຄົນດຽວກັນທັງເຮັດແລະສະເຫວີຍແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໗໑] ສກ. ບຸກຄົນຄົນດຽວກັນທັງເຮັດແລະສະເຫວີຍແມ່ນບໍ?

ປຣ. ແມ່ນ

ສກ. ສຸກແລະທຸກມີຕົນເອງເປັນຕົວການແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໗໒] ສກ. ທ່ານຢັ່ງຮູ້ກຳດີແລະກຳຊົ່ວໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ເຮັດຜູ້ສັ່ງໃຫ້ເຮັດ ຜູ້ສະເຫວີຍວິບາກຂອງກຳດີແລະກຳຊົ່ວໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນເປັນຄົນລະຄົນກັນທັງເຮັດແລະສະເຫວີຍແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໗໓] ສກ. ບຸກຄົນເປັນຄົນລະຄົນກັນທັງເຮັດແລະສະເຫວີຍແມ່ນບໍ?

ປຣ. ແມ່ນ

ສກ. ສຸກແລະທຸກມີຜູ້ອື່ນເປັນຕົວການແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໗໔] ສກ. ທ່ານຢັ່ງຮູ້ກຳດີແລະກຳຊົ່ວໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ເຮັດ ຜູ້ສັ່ງໃຫ້ເຮັດ ຜູ້ສະເຫວີຍວິບາກຂອງກຳດີແລະກຳຊົ່ວໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນທັງທີ່ເປັນຄົນດຽວກັນ ແລະຄົນລະຄົນກັນທັງເຮັດແລະສະເຫວີຍແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໗໕] ສກ. ບຸກຄົນທັງທີ່ເປັນຄົນດຽວກັນ ແລະຄົນລະຄົນກັນທັງເຮັດແລະສະເຫວີຍແມ່ນບໍ?

ປຣ. ແມ່ນ

ສກ. ສຸກແລະທຸກມີທັງຕົນເອງເປັນຕົວການແລະຜູ້ອື່ນເປັນຕົວການແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໗໖] ສກ. ທ່ານຢັ່ງຮູ້ກຳດີແລະກຳຊົ່ວໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ເຮັດ ຜູ້ສັ່ງໃຫ້ເຮັດ ຜູ້ສະເຫວີຍວິບາກຂອງກຳດີແລະກຳຊົ່ວໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຈະວ່າເປັນຄົນດຽວກັນກໍບໍ່ແມ່ນ ຈະວ່າເປັນຄົນລະຄົນກັນກໍບໍ່ແມ່ນທັງເຮັດແລະສະເຫວີຍແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໗໗] ສກ. ບຸກຄົນຈະວ່າເປັນຄົນດຽວກັນກໍບໍ່ແມ່ນ ຈະວ່າເປັນຄົນລະຄົນກັນກໍບໍ່ແມ່ນທັງເຮັດແລະສະເຫວີຍແມ່ນບໍ?

ປຣ. ແມ່ນ

ສກ. ສຸກແລະທຸກເກີດຂຶ້ນເອງຈະວ່າມີຕົນເອງເປັນຕົວການກໍບໍ່ແມ່ນ ຈະວ່າມີຜູ້ອື່ນເປັນຕົວການກໍບໍ່ແມ່ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໗໘] ສກ. ທ່ານຢັ່ງຮູ້ກຳດີແລະກຳຊົ່ວໄດ້ ຍ້ອນເຫດນັ້ນ ຈຶ່ງຢັ່ງຮູ້ບຸກຄົນຜູ້ເຮັດ ຜູ້ສັ່ງໃຫ້ເຮັດ ຜູ້ສະເຫວີຍວິບາກຂອງກຳດີແລະກຳຊົ່ວໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນເປັນຄົນດຽວກັນທັງເຮັດແລະສະເຫວີຍ ບຸກຄົນຄົນລະຄົນກັນທັງເຮັດແລະສະເຫວີຍ ບຸກຄົນທັງທີ່ເປັນຄົນດຽວກັນແລະຄົນລະຄົນກັນທັງເຮັດແລະສະເຫວີຍ ບຸກຄົນຈະວ່າເປັນຄົນດຽວກັນກໍບໍ່ແມ່ນ ຈະວ່າເປັນຄົນລະຄົນກັນກໍບໍ່ແມ່ນ ທັງເຮັດແລະສະເຫວີຍແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໗໙] ສກ. ບຸກຄົນເປັນຄົນດຽວກັນທັງເຮັດແລະສະເຫວີຍ ບຸກຄົນຄົນລະຄົນກັນທັງເຮັດແລະສະເຫວີຍ ບຸກຄົນທັງທີ່ເປັນຄົນດຽວກັນແລະຄົນລະຄົນກັນທັງເຮັດແລະສະເຫວີຍ ບຸກຄົນຈະວ່າເປັນຄົນດຽວກັນກໍບໍ່ແມ່ນ ຈະວ່າເປັນຄົນລະຄົນກັນກໍບໍ່ແມ່ນ ທັງເຮັດແລະສະເຫວີຍແມ່ນບໍ?

ປຣ. ແມ່ນ

ສກ. ສຸກແລະທຸກມີຕົນເອງເປັນຕົວການ ສຸກແລະທຸກມີຜູ້ອື່ນເປັນຕົວການ ສຸກແລະທຸກທັງມີຕົນເອງແລະຜູ້ອື່ນເປັນຕົວການ ສຸກແລະທຸກເກີດຂຶ້ນເອງ ຈະວ່າມີຕົນເອງເປັນຕົວການ ກໍບໍ່ແມ່ນ ຈະວ່າມີຜູ້ອື່ນເປັນຕົວການກໍບໍ່ແມ່ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໗໐] ປຣ. ກຳມີຢູ່ແມ່ນບໍ?

ສກ. ແມ່ນ

ປຣ. ບຸກຄົນຜູ້ເຮັດກຳມີຢູ່ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໗໑] ສກ. ກຳມີຢູ່ ຍ້ອນເຫດນັ້ນ ບຸກຄົນຜູ້ເຮັດກຳຈຶ່ງມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ເຮັດກຳນັ້ນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໗໒] ສກ. ບຸກຄົນຜູ້ເຮັດກຳນັ້ນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ການເຮັດບ່ອນສຸດທຸກບໍ່ມີ ການຕັດຂາດວັດຕະບໍ່ມີ ອະນຸປາທາປະຣິນິບພານກໍບໍ່ມີແກ່ບຸກຄົນຜູ້ເຮັດເຊິ່ງບຸກຄົນຜູ້ເຮັດກຳທັງ ໒ ຊັ້ນດັ່ງກ່າວມານັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໗໓] ສກ. ກຳມີຢູ່ ຍ້ອນເຫດນັ້ນ ບຸກຄົນຜູ້ເຮັດກຳຈຶ່ງມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໗໔] ສກ. ກຳມີຢູ່ ຍ້ອນເຫດນັ້ນ ບຸກຄົນຜູ້ເຮັດກຳຈຶ່ງມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ນິບພານມີຢູ່ ຍ້ອນເຫດນັ້ນ ບຸກຄົນຜູ້ເຮັດນິບພານຈຶ່ງມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໗໕] ສກ. ກຳມີຢູ່ ຍ້ອນເຫດນັ້ນ ບຸກຄົນຜູ້ເຮັດກຳຈຶ່ງມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ມະຫາປະຖະພີມີຢູ່ ຯລຯ ມະຫາສະມຸດ ຯລຯ ພູເຂົາສິເນຣຸ ຯລຯ ນໍ້າ ຯລຯ ໄຟ ຯລຯ ລົມ ຯລຯ ຫຍ້າ ໄມ້ ແລະຕົ້ນໄມ້ເຈົ້າປ່າມີຢູ່ ຍ້ອນເຫດນັ້ນ ບຸກຄົນຜູ້ເຮັດຫຍ້າ ໄມ້ ແລະຕົ້ນໄມ້ເຈົ້າປ່າຈຶ່ງມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໗໖] ສກ. ກໍາມີຢູ່ ຍ້ອນເຫດນັ້ນ ບຸກຄົນຜູ້ເຮັດກໍາຈຶ່ງມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ກໍາກັບບຸກຄົນຜູ້ເຮັດກໍາເປັນຄົນລະຢ່າງກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໗໗] ປຣ. ວິບາກມີຢູ່ແມ່ນບໍ?

ສກ. ແມ່ນ

ປຣ. ບຸກຄົນຜູ້ສະເຫວີຍວິບາກມີຢູ່ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໗໘] ສກ. ວິບາກມີຢູ່ ຍ້ອນເຫດນັ້ນ ບຸກຄົນຜູ້ສະເຫວີຍວິບາກຈຶ່ງມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ສະເຫວີຍເຊິ່ງບຸກຄົນຜູ້ສະເຫວີຍວິບາກນັ້ນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໗໙] ສກ. ບຸກຄົນຜູ້ສະເຫວີຍເຊິ່ງບຸກຄົນຜູ້ສະເຫວີຍວິບາກນັ້ນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ການເຮັດບ່ອນສຸດທຸກບໍ່ມີ ການຕັດຂາດວັດຕະບໍ່ມີ ອະນຸປາທາປະຣິນິບພານກໍບໍ່ມີແກ່ບຸກຄົນຜູ້ສະເຫວີຍເຊິ່ງບຸກຄົນຜູ້ສະເຫວີຍວິບາກທັງ ໔ ຊັ້ນດັ່ງກ່າວມານັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວິບາກມີຢູ່ ຍ້ອນເຫດນັ້ນ ບຸກຄົນຜູ້ສະເຫວີຍວິບາກຈຶ່ງມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນມີຢູ່ ຍ້ອນເຫດນັ້ນ ບຸກຄົນຜູ້ສະເຫວີຍເຊິ່ງບຸກຄົນຈຶ່ງມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໘໐] ສກ. ວິບາກມີຢູ່ ຍ້ອນເຫດນັ້ນ ບຸກຄົນຜູ້ສະເຫວີຍວິບາກຈຶ່ງມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ນິບພານມີຢູ່ ຍ້ອນເຫດນັ້ນ ບຸກຄົນຜູ້ສະເຫວີຍນິບພານຈຶ່ງມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໙໑] ສກ. ວິບາກມີຢູ່ ຍ້ອນເຫດນັ້ນ ບຸກຄົນຜູ້ສະເຫວີຍວິບາກຈຶ່ງມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ມະຫາປະຖະພີມີຢູ່ ຯລຯ ມະຫາສະມຸດ ຯລຯ ພູເຂົາສິເນຣຸ ຯລຯ ນ້ຳ ຯລຯ ໄຟ ຯລຯ ລົມ ຯລຯ ຫຍ້າ ໄມ້ ແລະຕົ້ນໄມ້ເຈົ້າປ່າມີຢູ່ ຍ້ອນເຫດນັ້ນ ບຸກຄົນຜູ້ສະເຫວີຍຫຍ້າ ໄມ້ ແລະຕົ້ນໄມ້ເຈົ້າປ່າຈຶ່ງມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໙໘] ສກ. ວິບາກມີຢູ່ ຍ້ອນເຫດນັ້ນ ບຸກຄົນຜູ້ສະເຫວີຍວິບາກຈຶ່ງມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ວິບາກເປັນຢ່າງໜຶ່ງ ບຸກຄົນຜູ້ສະເຫວີຍວິບາກກໍເປັນຢ່າງໜຶ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ (ຫຍໍ້)

**ກັນລະຍານະວັກ ທີ ໑ ຈົບ**

## ໑໔. ອະພິນຍານຸໂຍຄະ

## ວ່າດ້ວຍການຊັກຖາມເຖິງອະພິນຍາ

[໑໙໓] ປຣ. ທ່ານບໍ່ຍອມຮັບວ່າ “ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ” ແມ່ນບໍ?

ສກ. ແມ່ນ

ປຣ. ບຸກຄົນບາງຄົນສະແດງລິດໄດ້ ມີຢູ່ບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກບຸກຄົນບາງຄົນສະແດງລິດໄດ້ມີຢູ່ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ “ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ”

[໑໙໔] ປຣ. ທ່ານບໍ່ຍອມຮັບວ່າ “ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ” ແມ່ນບໍ?

ສກ. ແມ່ນ

ປຣ. ບຸກຄົນບາງຄົນຟັງສຽງດ້ວຍທິບພະໂສຕະທາດໄດ້ ຯລຯ ຮູ້ຈິດຂອງບຸກຄົນອື່ນໄດ້ ຯລຯ ຫວນຣະລຶກເຖິງຊາດປາງກ່ອນໄດ້ ຯລຯ ເຫັນຮູບດ້ວຍທິບພະຈັກຂຸໄດ້ ຯລຯ ເຮັດໃຫ້ແຈ້ງ ຄວາມສິ້ນໄປແຫ່ງອາສະວະໄດ້ມີຢູ່ບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກບຸກຄົນບາງຄົນເຮັດໃຫ້ແຈ້ງຄວາມສິ້ນໄປແຫ່ງອາສະວະໄດ້ມີຢູ່ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ"

[໑໙໕] ສກ. ຍ້ອນທ່ານເຂົ້າໃຈວ່າ "ບຸກຄົນບາງຄົນສະແດງລິດໄດ້ມີຢູ່" ຈຶ່ງຍອມຮັບວ່າ "ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ" ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ສະແດງລິດໄດ້ເທົ່ານັ້ນຈຶ່ງຈັດເປັນບຸກຄົນ ບຸກຄົນຜູ້ສະແດງລິດບໍ່ໄດ້ບໍ່ຈັດເປັນບຸກຄົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໙໖] ສກ. ບຸກຄົນຜູ້ຟັງສຽງດ້ວຍທິບພະໂສຕະທາດໄດ້ ຯລຯ ຮູ້ຈິດຂອງບຸກຄົນອື່ນໄດ້ ຯລຯ ຫວນຣະລຶກເຖິງຊາດປາງກ່ອນໄດ້ ຯລຯ ເຫັນຮູບດ້ວຍທິບພະຈັກຂຸໄດ້ ຯລຯ ເຮັດໃຫ້ແຈ້ງຄວາມສິ້ນໄປແຫ່ງອາສະວະໄດ້ ຈຶ່ງຈັດເປັນບຸກຄົນ ບຸກຄົນຜູ້ເຮັດໃຫ້ແຈ້ງຄວາມສິ້ນໄປແຫ່ງ

ອາສະວະບໍ່ໄດ້ບໍ່ຈັດເປັນບຸກຄົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

**ອະພິນຍານຸໂຍຄະ ຈົບ**

## ໑໕.-໑໗. ຍາຕະການຸໂຍຄາທີ ໑

## ວ່າດ້ວຍການຊັກຖາມເຖິງຍາດພີ່ນ້ອງ ເປັນຕົ້ນ

[໑໙໗] ປຣ. ທ່ານບໍ່ຍອມຮັບວ່າ "ທ່ານຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ" ແມ່ນບໍ?

ສກ. ແມ່ນ

ປຣ. ມານດາມີຢູ່ບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກມານດາມີຢູ່ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ"

[໑໙໘] ປຣ. ທ່ານບໍ່ຍອມຮັບວ່າ "ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ" ແມ່ນບໍ?

ສກ. ແມ່ນ

ປຣ. ບິດາມີຢູ່ ຯລຯ ອ້າຍນ້ອງຊາຍມີຢູ່ ຯລຯ ເອື້ອຍນ້ອງສາວມີຢູ່ ຯລຯ ກະສັດມີຢູ່ ຯລຯ ພາມມີຢູ່ ຯລຯ ແພດມີຢູ່ ຯລຯ ສູດມີຢູ່ ຯລຯ ຄະລຶຫັດມີຢູ່ ຯລຯ ບັນພະຊິດມີຢູ່ ຯລຯ ເທວະດາມີຢູ່ ຯລຯ ມະນຸດມີຢູ່ບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກມະນຸດມີຢູ່ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ຂ້າພະເຈົ້າຍັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ"

[໑໙໙] ສກ. ຍ້ອນທ່ານເຂົ້າໃຈວ່າ "ມານດາມີຢູ່" ຈຶ່ງຍອມຮັບວ່າ "ຂ້າພະເຈົ້າຍັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ" ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນບາງຄົນບໍ່ເຄີຍເປັນມານດາແລ້ວມາເປັນມານດາມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນບາງຄົນບໍ່ເຄີຍເປັນບຸກຄົນແລ້ວມາເປັນບຸກຄົນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນບາງຄົນບໍ່ເຄີຍເປັນບິດາ ຯລຯ ບໍ່ເຄີຍເປັນອ້າຍນ້ອງຊາຍ ຯລຯ ບໍ່ເຄີຍເປັນເອື້ອຍນ້ອງສາວ ຯລຯ ບໍ່ເຄີຍເປັນກະສັດ ຯລຯ ບໍ່ເຄີຍເປັນພາມ ຯລຯ ບໍ່ເຄີຍເປັນແພດ ຯລຯ ບໍ່ເຄີຍເປັນສູດ ຯລຯ ບໍ່ເຄີຍເປັນຄະລຶຫັດ ຯລຯ ບໍ່ເຄີຍເປັນບັນພະຊິດ ຯລຯ ບໍ່ເຄີຍເປັນເທວະດາ ຯລຯ ບໍ່ເຄີຍເປັນມະນຸດແລ້ວມາເປັນມະນຸດມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນບາງຄົນບໍ່ເຄີຍເປັນບຸກຄົນແລ້ວມາເປັນບຸກຄົນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໐໐] ສກ. ຍ້ອນທ່ານເຂົ້າໃຈວ່າ "ມານດາມີຢູ່" ຈຶ່ງຍອມຮັບວ່າ "ຂ້າພະເຈົ້າຍັ່ງຮູ້ ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ" ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນບາງຄົນເຄີຍເປັນມານດາແລ້ວບໍ່ເປັນມານດາມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນບາງຄົນເຄີຍເປັນບຸກຄົນແລ້ວບໍ່ເປັນບຸກຄົນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນບາງຄົນເຄີຍເປັນບິດາ ຯລຯ ເຄີຍເປັນອ້າຍນ້ອງຊາຍ ຯລຯ ເຄີຍເປັນເອື້ອຍນ້ອງສາວ ຯລຯ ເຄີຍເປັນກະສັດ ຯລຯ ເຄີຍເປັນພາມ ຯລຯ ເຄີຍເປັນແພດ ຯລຯ

ເຄີຍເປັນສູດ ຯລຯ ເຄີຍເປັນຄະລິທັດ ຯລຯ ເຄີຍເປັນບັນພະຊິດ ຯລຯ ເຄີຍເປັນເທວະດາ ຯລຯ ເຄີຍເປັນມະນຸດແລ້ວບໍ່ເປັນມະນຸດມີຢູ່ ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນບາງຄົນເຄີຍເປັນບຸກຄົນແລ້ວບໍ່ເປັນບຸກຄົນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

**ຍາຕະການຸໂຍຄາທິ ຈົບ**

## ໑໙. ປະຕິເວທານຸໂຍຄະ

## ວ່າດ້ວຍການຊັກຖາມເຖິງຜູ້ບັນລຸທຳ (ພຣະອະຣິຍະ)

[໔໐໑] ປຣ. ທ່ານບໍ່ຍອມຮັບວ່າ "ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ" ແມ່ນບໍ?

ສກ. ແມ່ນ

ປຣ. ບຸກຄົນຜູ້ເປັນພຣະໂສດາບັນມີຢູ່ບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກບຸກຄົນຜູ້ເປັນພຣະໂສດາບັນມີຢູ່ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ"

[໔໐໔] ປຣ. ທ່ານບໍ່ຍອມຮັບວ່າ "ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ" ແມ່ນບໍ?

ສກ. ແມ່ນ

ປຣ. ບຸກຄົນຜູ້ເປັນພຣະສະກະທາຄາມີມີຢູ່ ຯລຯ ບຸກຄົນຜູ້ເປັນພຣະອະນາຄາມີມີຢູ່ ຯລຯ ບຸກຄົນຜູ້ເປັນພຣະອະຣະຫັນມີຢູ່ ຯລຯ ບຸກຄົນຜູ້ເປັນອຸພະໂຕພາຄະວິມຸດມີຢູ່ ຯລຯ ບຸກຄົນຜູ້ເປັນປັນຍາວິມຸດມີຢູ່ ຯລຯ ບຸກຄົນຜູ້ເປັນກາຍະສັກຂີມີຢູ່ ຯລຯ ບຸກຄົນຜູ້ເປັນທິດຖິປັດຕະມີຢູ່ ຯລຯ ບຸກຄົນຜູ້ເປັນສັດທາວິມຸດມີຢູ່ ຯລຯ ບຸກຄົນຜູ້ເປັນທຳມານຸສາຣີມີຢູ່ ຯລຯ ບຸກຄົນຜູ້ເປັນສັດທານຸສາຣີມີຢູ່ ບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກບຸກຄົນຜູ້ເປັນສັດທານຸສາຣີມີຢູ່ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ"

[໔໐໕] ສກ. ຍ້ອນທ່ານເຂົ້າໃຈວ່າ "ບຸກຄົນຜູ້ເປັນພຣະໂສດາບັນມີຢູ່" ຈຶ່ງຍອມຮັບວ່າ "ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ" ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນບາງຄົນບໍ່ເຄີຍເປັນພຣະໂສດາບັນແລ້ວມາເປັນພຣະໂສດາບັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນບາງຄົນບໍ່ເຄີຍເປັນບຸກຄົນແລ້ວມາເປັນບຸກຄົນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໐໔] ສກ. ບຸກຄົນບາງຄົນບໍ່ເຄີຍເປັນພຣະສະກະທາຄາມີ ຯລຯ ບໍ່ເຄີຍເປັນພຣະອະນາຄາມີ ຯລຯ ບໍ່ເຄີຍເປັນພຣະອະຣະຫັນ ຯລຯ ບໍ່ເຄີຍເປັນອຸພະໂຕພາຄະວິມຸດ ຯລຯ ບໍ່ເຄີຍເປັນປັນຍາວິມຸດ ຯລຯ ບໍ່ເຄີຍເປັນກາຍະສັກຂີ ຯລຯ ບໍ່ເຄີຍເປັນທິດຖິປັດຕະ ຯລຯ ບໍ່ເຄີຍເປັນສັດທາວິມຸດ ຯລຯ ບໍ່ເຄີຍເປັນທຳມານຸສາຣີ ຯລຯ ບໍ່ເຄີຍເປັນສັດທານຸສາຣີແລ້ວເປັນສັດທານຸສາຣີມີຢູ່ ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນບາງຄົນບໍ່ເຄີຍເປັນບຸກຄົນແລ້ວມາເປັນບຸກຄົນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໐໕] ສກ. ຍ້ອນທ່ານເຂົ້າໃຈວ່າ "ບຸກຄົນຜູ້ເປັນພຣະໂສດາບັນມີຢູ່" ຈຶ່ງຍອມຮັບວ່າ "ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ" ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນບາງຄົນເຄີຍເປັນພຣະໂສດາບັນແລ້ວບໍ່ເປັນພຣະໂສດາບັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນບາງຄົນເຄີຍເປັນບຸກຄົນແລ້ວບໍ່ເປັນບຸກຄົນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນບາງຄົນເຄີຍເປັນພຣະສະກະທາຄາມີ ຯລຯ ເຄີຍເປັນພຣະອະນາຄາມີແລ້ວບໍ່ເປັນພຣະອະນາຄາມີມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນບາງຄົນເຄີຍເປັນບຸກຄົນແລ້ວບໍ່ເປັນບຸກຄົນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

**ປະຕິເວທານຸໂຍຄະ ຈົບ**

## ໔໐. ສັງຄານຸໂຍຄະ
## ວ່າດ້ວຍການຊັກຖາມເຖິງສົງ

[໔໐໖] ປຣ. ທ່ານບໍ່ຍອມຮັບວ່າ "ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ" ແມ່ນບໍ?

ສກ. ແມ່ນ

ປຣ. ອະຣິຍະບຸກຄົນ ໔ ຄູ່ ຄື ໘ ບຸກຄົນ ມີຢູ່ບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກອະຣິຍະບຸກຄົນ ໔ ຄູ່ ຄື ໘ ບຸກຄົນມີຢູ່ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ"

[໔໐໗] ສກ. ຍ້ອນທ່ານເຂົ້າໃຈວ່າ "ອະຣິຍະບຸກຄົນ ໔ ຄູ່ ຄື ໘ ບຸກຄົນ ມີຢູ່" ຈຶ່ງຍອມຮັບວ່າ "ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ" ແມ່ນບໍ?

ປຣ. ແມ່ນ

ສກ. ອະຣິຍະບຸກຄົນ ໔ ຄູ່ ຄື ໘ ບຸກຄົນຜາກົດໄດ້ ຍ້ອນພຣະພຸດທະເຈົ້າຜາກົດແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜາກົດໄດ້ ຍ້ອນພຣະພຸດທະເຈົ້າຜາກົດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜາກົດໄດ້ ຍ້ອນພຣະພຸດທະເຈົ້າຜາກົດແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອພຣະຜູ້ມີພຣະພາກພຸດທະເຈົ້າປະຣິນິບພານແລ້ວ ບຸກຄົນກໍຂາດສູນໄປ ບຸກຄົນບໍ່ມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

**ສັງຄານຸໂຍຄະ ຈົບ**

## ໔໑. ສັດສິກັດຖະສະພາຄານຸໂຍຄະ
## ວ່າດ້ວຍການຊັກຖາມເຖິງສະພາວະແຫ່ງສັດສິກັດຖະ

[໔໐໘] ສກ. ທ່ານຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນເປັນສະພາວະທີ່ຖືກປັດໄຈປຸງແຕ່ງ (ສັງຂະຕະ) ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນເປັນສະພາວະທີ່ບໍ່ຖືກປັດໄຈປຸງແຕ່ງ (ອະສັງຂະຕະ) ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນເປັນສະພາວະທີ່ຖືກປັດໄຈປຸງແຕ່ງກໍບໍ່ແມ່ນ ບໍ່ຖືກປັດໄຈປຸງແຕ່ງກໍບໍ່ແມ່ນ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໐໙] ສກ. ບຸກຄົນເປັນສະພາວະທີ່ຖືກປັດໄຈປຸງແຕ່ງກໍບໍ່ແມ່ນ ບໍ່ຖືກປັດໄຈປຸງແຕ່ງກໍບໍ່ແມ່ນແມ່ນບໍ?

ປຣ. ແມ່ນ

ສກ. ນອກຈາກສິ່ງທີ່ຖືກປັດໄຈປຸງແຕ່ງແລະບໍ່ຖືກປັດໄຈປຸງແຕ່ງ ຍັງມີສ່ວນທີ ໓ ອີກ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໑໐] ສກ. ນອກຈາກສິ່ງທີ່ຖືກປັດໄຈປຸງແຕ່ງແລະບໍ່ຖືກປັດໄຈປຸງແຕ່ງ ຍັງມີສ່ວນທີ ໓ ອີກແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ທາດ ໒ ປະການນີ້ ທາດ ໒ ປະການ ອັນໃດແດ່ ຄື (໑) ທາດທີ່ຖືກປັດໄຈປຸງແຕ່ງ (໒) ທາດທີ່ບໍ່ຖືກປັດໄຈປຸງແຕ່ງ ນີ້ຄື ທາດ ໒ ປະການ"[໑] ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ນອກຈາກສິ່ງທີ່ຖືກປັດໄຈປຸງແຕ່ງແລະບໍ່ຖືກປັດໄຈປຸງແຕ່ງ ຍັງມີສ່ວນທີ ໓ ອີກ"

[໔໑໑] ສກ. ບຸກຄົນເປັນສະພາວະທີ່ຖືກປັດໄຈປຸງແຕ່ງກໍບໍ່ແມ່ນ ບໍ່ຖືກປັດໄຈປຸງແຕ່ງກໍບໍ່ແມ່ນແມ່ນບໍ?

ປຣ. ແມ່ນ

ສກ. ສິ່ງທີ່ຖືກປັດໄຈປຸງແຕ່ງ ສິ່ງທີ່ບໍ່ຖືກປັດໄຈປຸງແຕ່ງ ແລະບຸກຄົນເປັນຄົນລະຢ່າງກັນ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໑໒] ສກ. ຂັນເປັນສະພາວະທີ່ຖືກປັດໄຈປຸງແຕ່ງ ນິບພານເປັນສະພາວະທີ່ບໍ່ຖືກປັດໄຈປຸງແຕ່ງ ບຸກຄົນເປັນສະພາວະທີ່ຖືກປັດໄຈປຸງແຕ່ງກໍບໍ່ແມ່ນ ບໍ່ຖືກປັດໄຈປຸງແຕ່ງກໍບໍ່ແມ່ນ ແມ່ນບໍ?

ປຣ. ແມ່ນ

ສກ. ຂັນ ນິບພານແລະບຸກຄົນເປັນຄົນລະຢ່າງກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໑໓] ສກ. ຮູບເປັນສະພາວະທີ່ຖືກປັດໄຈປຸງແຕ່ງ ນິບພານເປັນສະພາວະທີ່ບໍ່ຖືກປັດໄຈປຸງແຕ່ງ ບຸກຄົນເປັນສະພາວະທີ່ຖືກປັດໄຈປຸງແຕ່ງກໍບໍ່ແມ່ນ ບໍ່ຖືກປັດໄຈປຸງແຕ່ງກໍບໍ່ແມ່ນແມ່ນບໍ?

ປຣ. ແມ່ນ

ສກ. ຮູບ ນິບພານ ແລະບຸກຄົນເປັນຄົນລະຢ່າງກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານເປັນສະພາວະທີ່ຖືກປັດໄຈປຸງແຕ່ງ ນິບພານເປັນສະພາວະທີ່ບໍ່ຖືກປັດໄຈປຸງແຕ່ງ ບຸກຄົນເປັນສະພາວະທີ່ຖືກປັດໄຈປຸງແຕ່ງກໍບໍ່ແມ່ນ ບໍ່ຖືກປັດໄຈປຸງແຕ່ງກໍບໍ່ແມ່ນແມ່ນບໍ?

ປຣ. ແມ່ນ

ສກ. ວິນຍານ ນິບພານ ແລະບຸກຄົນເປັນຄົນລະຢ່າງກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໑໔] ສກ. ບຸກຄົນມີຄວາມເກີດຂຶ້ນຜາກົດ ມີຄວາມດັບສະຫຼາຍຜາກົດ ເມື່ອດຳລົງຢູ່ ມີຄວາມແປຜັນຜາກົດແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນເປັນສະພາວະທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ສັງຂະຕະລັກສະນະແຫ່ງສັງຂະຕະທຳ ໓ ປະການນີ້ ຄື (໑) ຄວາມເກີດຂຶ້ນຜາກົດ (໒) ຄວາມດັບສະຫຼາຍຜາກົດ (໓) ເມື່ອດຳລົງຢູ່ ຄວາມແປຜັນຜາກົດ"[໑] ບຸກຄົນມີຄວາມເກີດຂຶ້ນຜາກົດ ມີຄວາມດັບສະຫຼາຍຜາກົດ ເມື່ອດຳລົງຢູ່ມີຄວາມແປຜັນຜາກົດ ດັ່ງນັ້ນ ບຸກຄົນຈຶ່ງເປັນສະພາວະທີ່ຖືກປັດໄຈປຸງແຕ່ງ

[໔໑໕] ສກ. ບຸກຄົນບໍ່ມີຄວາມເກີດຂຶ້ນຜາກົດ ບໍ່ມີຄວາມດັບສະຫຼາຍຜາກົດ ເມື່ອດຳລົງຢູ່ບໍ່ມີຄວາມແປຜັນຜາກົດແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ອະສັງຂະຕະລັກສະນະແຫ່ງອະສັງຂະຕະທຳ ໓ ປະການນີ້ ຄື (໑) ຄວາມເກີດຂຶ້ນບໍ່ຜາກົດ (໔) ຄວາມດັບສະຫຼາຍບໍ່ຜາກົດ (໓) ເມື່ອດຳລົງຢູ່ ຄວາມແປຜັນບໍ່ຜາກົດ" ບຸກຄົນບໍ່ມີຄວາມເກີດຂຶ້ນຜາກົດ ບໍ່ມີຄວາມດັບສະຫຼາຍຜາກົດ ເມື່ອດຳລົງຢູ່ ບໍ່ມີຄວາມແປຜັນຜາກົດ ດັ່ງນັ້ນ ບຸກຄົນຈຶ່ງເປັນສະພາວະທີ່ບໍ່ຖືກປັດໄຈປຸງແຕ່ງ

[໔໑໖] ສກ. ບຸກຄົນປະຣິນິບພານແລ້ວມີຢູ່ໃນນິບພານ ຫຼື ບໍ່ມີຢູ່ໃນນິບພານ

ປຣ. ມີຢູ່ໃນນິບພານ

ສກ. ບຸກຄົນປະຣິນິບພານແລ້ວເປັນຜູ້ທ່ຽງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນປະຣິນິບພານແລ້ວມີຢູ່ໃນນິບພານຫຼືບໍ່ມີຢູ່ໃນນິບພານ

ປຣ. ບໍ່ມີຢູ່ໃນນິບພານ

ສກ. ບຸກຄົນປະຣິນິບພານແລ້ວເປັນຜູ້ຂາດສູນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໑໗] ສກ. ບຸກຄົນອາໄສສິ່ງໃດດຳລົງຢູ່

ປຣ. ບຸກຄົນອາໄສພົບດຳລົງຢູ່

ສກ. ພົບບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສປັດໄຈເກີດຂຶ້ນ ມີຄວາມສິ້ນໄປ ເສື່ອມໄປ ຄາຍອອກ ດັບໄປ ແປຜັນໄປເປັນທຳມະດາແມ່ນບໍ?

ປຣ. ແມ່ນ

ສກ. ແມ່ນບຸກຄົນກໍບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສປັດໄຈເກີດຂຶ້ນ ມີຄວາມສິ້ນໄປ ເສື່ອມໄປ ຄາຍອອກ ດັບໄປ ແປຜັນໄປເປັນທຳມະດາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໑໘] ປຣ. ທ່ານບໍ່ຍອມຮັບວ່າ "ຂ້າພະເຈົ້າຍັງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ" ແມ່ນບໍ?

ສກ. ແມ່ນ

ປຣ. ບຸກຄົນບາງຄົນເມື່ອສະເຫວີຍສຸກຂະເວທະນາຈຶ່ງຮູ້ຊັດແຈ້ງວ່າ "ຂ້າພະເຈົ້າສະເຫວີຍສຸກຂະເວທະນາມີຢູ່" ບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກບຸກຄົນບາງຄົນເມື່ອສະເຫວີຍສຸກຂະເວທະນາຈຶ່ງຮູ້ຊັດແຈ້ງວ່າ "ຂ້າພະເຈົ້າສະເຫວີຍສຸກຂະເວທະນາ ມີຢູ່" ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ຂ້າພະເຈົ້າຍັງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ"

[໔໑໙] ປຣ. ທ່ານບໍ່ຍອມຮັບວ່າ "ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ" ແມ່ນບໍ?

ສກ. ແມ່ນ

ປຣ. ບຸກຄົນບາງຄົນເມື່ອສະເຫວີຍທຸກຂະເວທະນາ ฯລฯ ເມື່ອສະເຫວີຍອະທຸກຂະມະສຸຂະເວທະນາຈຶ່ງຮູ້ຊັດແຈ້ງວ່າ "ຂ້າພະເຈົ້າສະເຫວີຍອະທຸກຂະມະສຸຂະເວທະນາ" ມີຢູ່ບໍ່ ແມ່ນບໍ?

ສກ. ແມ່ນ

ປຣ. ຫາກບຸກຄົນບາງຄົນເມື່ອສະເຫວີຍອະທຸກຂະມະສຸຂະເວທະນາຈຶ່ງຮູ້ຊັດແຈ້ງວ່າ "ຂ້າພະເຈົ້າສະເຫວີຍອະທຸກຂະມະສຸຂະເວທະນາ" ມີຢູ່ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ ໂດຍສັດສິກັດຖະປະຣະມັດ"

[໔໘໐] ສກ. ຍ້ອນທ່ານເຂົ້າໃຈວ່າ "ບຸກຄົນບາງຄົນເມື່ອສະເຫວີຍສຸກຂະເວທະນາຈຶ່ງຮູ້ຊັດແຈ້ງວ່າ ຂ້າພະເຈົ້າສະເຫວີຍສຸກຂະເວທະນາ ມີຢູ່" ຈຶ່ງຍອມຮັບວ່າ "ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ" ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ທີ່ສະເຫວີຍສຸກຂະເວທະນາຢູ່ຮູ້ຊັດແຈ້ງວ່າ "ຂ້າພະເຈົ້າສະເຫວີຍສຸກຂະເວທະນາ" ເທົ່ານັ້ນຈັດເປັນບຸກຄົນ ບຸກຄົນຜູ້ທີ່ສະເຫວີຍສຸກຂະເວທະນາຢູ່ແຕ່ບໍ່ຮູ້ຊັດແຈ້ງວ່າ "ຂ້າພະເຈົ້າສະເຫວີຍສຸກຂະເວທະນາ" ນັ້ນ ບໍ່ຈັດເປັນບຸກຄົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ບຸກຄົນຜູ້ທີ່ສະເຫວີຍທຸກຂະເວທະນາຢູ່ ฯລฯ ບຸກຄົນຜູ້ທີ່ສະເຫວີຍອະທຸກຂະມະສຸຂະເວທະນາຢູ່ຮູ້ຊັດແຈ້ງວ່າ "ຂ້າພະເຈົ້າສະເຫວີຍອະທຸກຂະມະສຸຂະເວທະນາ" ເທົ່ານັ້ນຈັດເປັນບຸກຄົນ ບຸກຄົນຜູ້ສະເຫວີຍອະທຸກຂະມະສຸຂະເວທະນາຢູ່ແຕ່ບໍ່ຮູ້ຊັດແຈ້ງວ່າ "ຂ້າພະເຈົ້າສະເຫວີຍອະທຸກຂະມະສຸຂະເວທະນາ" ນັ້ນບໍ່ຈັດເປັນບຸກຄົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໔໘໑] ສກ. ຍ້ອນທ່ານເຂົ້າໃຈວ່າ "ບຸກຄົນບາງຄົນເມື່ອສະເຫວີຍສຸກຂະເວທະນາຈຶ່ງຮູ້ຊັດແຈ້ງວ່າ ເຮົາສະເຫວີຍສຸກຂະເວທະນາ ມີຢູ່" ຈຶ່ງຍອມຮັບວ່າ "ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ" ແມ່ນບໍ?

ປຣ. ແມ່ນ

ສກ. ສຸກຂະເວທະນາກັບບຸກຄົນຜູ້ສະເຫວີຍສຸກຂະເວທະນາຢູ່ຮູ້ຊັດແຈ້ງວ່າ "ຂ້າພະເຈົ້າສະເຫວີຍສຸກຂະເວທະນາ" ເປັນຄົນລະຢ່າງກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ທຸກຂະເວທະນາ ຯລຯ ອະທຸກຂະມະສຸຂະເວທະນາກັບບຸກຄົນຜູ້ທີ່ສະເຫວີຍອະທຸກຂະມະສຸກຂະເວທະນາຢູ່ຮູ້ຊັດແຈ້ງວ່າ "ຂ້າພະເຈົ້າສະເຫວີຍອະທຸກຂະມະສຸຂະເວທະນາ" ເປັນຄົນລະຢ່າງກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໔໔] ປຣ. ທ່ານບໍ່ຍອມຮັບວ່າ "ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ" ແມ່ນບໍ?

ສກ. ແມ່ນ

ປຣ. ບຸກຄົນບາງຄົນພິຈາລະນາເຫັນກາຍໃນກາຍຢູ່ ມີຢູ່ບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກບຸກຄົນບາງຄົນພິຈາລະນາເຫັນກາຍໃນກາຍຢູ່ ມີຢູ່ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ"

[໔໔໖] ປຣ. ທ່ານບໍ່ຍອມຮັບວ່າ "ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ" ແມ່ນບໍ?

ສກ. ແມ່ນ

ປຣ. ບຸກຄົນບາງຄົນພິຈາລະນາເຫັນເວທະນາໃນເວທະນາ ຯລຯ ພິຈາລະນາເຫັນຈິດໃນຈິດ ຯລຯ ພິຈາລະນາເຫັນທຳໃນທຳຢູ່ ມີຢູ່ບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກບຸກຄົນບາງຄົນພິຈາລະນາເຫັນທຳໃນທຳຢູ່ ມີຢູ່ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ"

[໔໔໔] ສກ. ຍ້ອນທ່ານເຂົ້າໃຈວ່າ "ບຸກຄົນບາງຄົນພິຈາລະນາເຫັນກາຍໃນກາຍຢູ່ ມີຢູ່" ຈຶ່ງຍອມຮັບວ່າ "ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ" ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ພິຈາລະນາເຫັນກາຍໃນກາຍຢູ່ເທົ່ານັ້ນຈັດເປັນບຸກຄົນ ບຸກຄົນຜູ້ບໍ່ພິຈາລະນາເຫັນກາຍໃນກາຍຢູ່ນັ້ນບໍ່ຈັດເປັນບຸກຄົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ພິຈາລະນາເຫັນເວທະນາໃນເວທະນາ ຯລຯ ພິຈາລະນາເຫັນຈິດໃນຈິດ ຯລຯ ພິຈາລະນາເຫັນທຳໃນທຳຢູ່ເທົ່ານັ້ນຈັດເປັນບຸກຄົນ ບຸກຄົນຜູ້ທີ່ບໍ່ພິຈາລະນາເຫັນທຳໃນທຳຢູ່ ບໍ່ຈັດເປັນບຸກຄົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໔໕] ສກ. ຍ້ອນທ່ານເຂົ້າໃຈວ່າ "ບຸກຄົນບາງຄົນພິຈາລະນາເຫັນກາຍໃນກາຍຢູ່ ມີຢູ່" ຈຶ່ງຍອມຮັບວ່າ "ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ" ແມ່ນບໍ?

ປຣ. ແມ່ນ

ສກ. ກາຍກັບບຸກຄົນຜູ້ພິຈາລະນາເຫັນກາຍໃນກາຍຢູ່ເປັນຄົນລະຢ່າງກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເວທະນາ ຯລຯ ຈິດ ຯລຯ ທຳກັບບຸກຄົນຜູ້ພິຈາລະນາເຫັນທຳໃນທຳຢູ່ເປັນຄົນລະຢ່າງກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໔໖] ສກ. ທ່ານຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ໂມຄະຣາດ ທ່ານຈົ່ງພິຈາລະນາເຫັນໂລກນີ້ໂດຍຄວາມວ່າງປ່າວມີສະຕິທຸກເມື່ອ ຖອນອັດຕານຸທິດຖິສາ ເປັນຜູ້ຂ້າມມັດຈຸຣາດສາໄດ້ດ້ວຍອາການແນວນີ້ ບຸກຄົນພິຈາລະນາເຫັນໂລກແນວນີ້ ມັດຈຸຣາດຈຶ່ງບໍ່ເຫັນ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ"

[໔໔໗] ສກ. ບຸກຄົນພິຈາລະນາເຫັນ (ໂລກ) ແມ່ນບໍ?

ປຣ. ແມ່ນ

ສກ. ພິຈາລະນາເຫັນ (ໂລກ) ພ້ອມກັບຮູບຫຼືເວັ້ນຈາກຮູບ

ປຣ. ພິຈາລະນາເຫັນ (ໂລກ) ພ້ອມກັບຮູບ

ສກ. ຊີວະກັບສະຣີຣະເປັນແນວດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພິຈາລະນາເຫັນ (ໂລກ) ພ້ອມກັບຮູບຫຼືເວັ້ນຈາກຮູບ

ປຣ. ພິຈາລະນາເຫັນ (ໂລກ) ເວັ້ນຈາກຮູບ

ສກ. ຊີວະກັບສະຣີຣະເປັນຄົນລະຢ່າງກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໔໘] ສກ. ບຸກຄົນພິຈາລະນາເຫັນ (ໂລກ) ແມ່ນບໍ?

ປຣ. ແມ່ນ

ສກ. ຢູ່ພາຍໃນ (ຮູບ) ພິຈາລະນາເຫັນຫຼືອອກໄປພາຍນອກ (ຮູບ) ແລ້ວຈຶ່ງພິຈາລະນາເຫັນ

ປຣ. ຢູ່ພາຍໃນ (ຮູບ) ພິຈາລະນາເຫັນ

ສກ. ຊີວະກັບສະຣີຣະເປັນແນວດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຢູ່ພາຍໃນ (ຮູບ) ພິຈາລະນາເຫັນຫຼືອອກໄປພາຍນອກ (ຮູບ) ແລ້ວຈຶ່ງພິຈາລະນາເຫັນ

ປຣ. ອອກໄປພາຍນອກ (ຮູບ) ແລ້ວຈຶ່ງພິຈາລະນາເຫັນ

ສກ. ຊີວະກັບສະຣີຣະເປັນຄົນລະຢ່າງກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໘໘໙] ປຣ. ທ່ານບໍ່ຍອມຮັບວ່າ "ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະຜູ້ມີພຣະພາກເຈົ້າຊົງເປັນສັດຈະວາທີ ກາລະວາທີ ພູຕະວາທີ ຕະຖາວາທີ ອະວິຕະຖະວາທີ໒ ອະນັນຍະຖະວາທີ ບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ບຸກຄົນຜູ້ປະຕິບັດເພື່ອເກື້ອກູນຕົນເອງມີຢູ່" ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ຂ້າພະເຈົ້າຈຶ່ງຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ

[໘໙໐] ປຣ. ທ່ານບໍ່ຍອມຮັບວ່າ "ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະຜູ້ມີພຣະພາກເຈົ້າຊົງເປັນສັດຈະວາທີ ກາລະວາທີ ພູຕະວາທີ ຕະຖະວາທີ ອະວິຕະຖະວາທີ ອະນັນຍະຖະວາທີ ບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ບຸກຄົນຜູ້ເປັນເອກເມື່ອເກີດຂຶ້ນໃນໂລກ ຍ່ອມເກີດຂຶ້ນເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອສຸກແກ່ຄົນທັງຫຼາຍ

ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ເທວະດາແລະມະນຸດທັງຫຼາຍ"໑ ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ຂ້າພະເຈົ້າຈຶ່ງຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ

[໔໓໑] ສກ. ທ່ານຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດແມ່ນບໍ?

ປຣ. ແມ່ນ

ສກ. ພຣະຜູ້ມີພຣະພາກເຈົ້າຊົງເປັນສັດຈະວາທີ ກາລະວາທີ ພູຕະວາທີ ຕະຖະວາທີ ອະວິຕະຖະວາທີ ອະນັນຍະຖະວາທີ ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ທຳທັງຫຼາຍທັງປວງເປັນອະນັດຕາ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ"

[໔໓໔] ສກ. ທ່ານຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດແມ່ນບໍ?

ປຣ. ແມ່ນ

ສກ. ພຣະຜູ້ມີພຣະພາກເຈົ້າຊົງເປັນສັດຈະວາທີ ກາລະວາທີ ພູຕະວາທີ ຕະຖະວາທີ ອະວິຕະຖະວາທີ ອະນັນຍະຖະວາທີ ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ອະຣິຍະສາວົກບໍ່ສົງໄສ ບໍ່ເຄືອບແຄງໃຈວ່າ ເມື່ອເກີດ ທຸກເທົ່ານັ້ນເກີດຂຶ້ນ ເມື່ອດັບ ທຸກເທົ່ານັ້ນດັບໄປ ອະຣິຍະສາວົກນັ້ນມີຍານຢັ່ງຮູ້ໃນເລື້ອງນີ້ໂດຍບໍ່ຕ້ອງເຊື່ອຜູ້ອື່ນເລີຍ ກັດຈານະ ດ້ວຍເຫດພຽງເທົ່ານີ້ຈັດວ່າເປັນສຳມາທິດຖິ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ"

[໔໓໕] ສກ. ທ່ານຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດແມ່ນບໍ?

ປຣ. ແມ່ນ

ສກ. ວະຊິຣາພິກຂຸນີກ່າວກັບມານຜູ້ມີບາບດັ່ງນີ້ວ່າ

　　ມານເອີຍ ທິດຖິຂອງເຈົ້າເຊື່ອໃຜບໍວ່າເປັນສັດ
ຮ່າງກາຍທີ່ເປັນກອງແຫ່ງສັງຂານລ້ວນ ໆ ນີ້
ບັດດິດຈະຮຽກວ່າສັດບໍ່ໄດ້ເລີຍ
　　ເມື່ອຂັນທັງຫຼາຍມີຢູ່ ສົມມຸດວ່າສັດກໍມີໄດ້
ເໝືອນສຽງເວົ້າວ່າລົດຍ່ອມມີໄດ້
ຍ້ອນການປະກອບເຂົ້າກັນແຫ່ງສ່ວນຕ່າງ ໆ

ອັນໜຶ່ງ ທຸກເທົ່ານັ້ນເກີດຂຶ້ນ
ທຸກເທົ່ານັ້ນດໍາລົງຢູ່ແລະແປຜັນໄປ
ນອກຈາກທຸກບໍ່ມີສິ່ງອື່ນເກີດຂຶ້ນ
ນອກຈາກທຸກ ບໍ່ມີສິ່ງໃດອື່ນດັບໄປເລີຍ"
ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ"

[໔໓໔] ສກ. ທ່ານຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດແມ່ນບໍ?

ປຣ. ແມ່ນ

ສກ. ທ່ານພຣະອານົນທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແຕ່ພະອົງຜູ້ຈະເລີນ ທີ່ພຣະອົງຕັດວ່າ "ໂລກວ່າງ ໂລກວ່າງ" ດ້ວຍເຫດພຽງໃດນໍ ຈຶ່ງຕັດວ່າ "ໂລກວ່າງ" ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອານົນ ຍ້ອນວ່າງຈາກອັດຕາ ຫຼື ສິ່ງທີ່ເນື່ອງດ້ວຍອັດຕາ ດັ່ງນັ້ນຈຶ່ງຮຽກວ່າ "ໂລກວ່າງ

ກໍອັນໃດນໍ? ຊື່ວ່າວ່າງຈາກອັດຕາຫຼືສິ່ງທີ່ເນື່ອງດ້ວຍອັດຕາ

ຄື ຈັກຂຸວ່າງຈາກອັດຕາ ຫຼື ສິ່ງທີ່ເນື່ອງດ້ວຍອັດຕາ ຮູບວ່າງຈາກອັດຕາ ຫຼືສິ່ງທີ່ເນື່ອງດ້ວຍອັດຕາ ฯลฯ ຈັກຂຸວິນຍານວ່າງຈາກອັດຕາ ຫຼື ສິ່ງທີ່ເນື່ອງດ້ວຍອັດຕາ ฯลฯ ຈັກຂຸສໍາຜັດວ່າງຈາກອັດຕາຫຼືສິ່ງທີ່ເນື່ອງດ້ວຍອັດຕາ ฯลฯ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກຫຼືບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສໍາຜັດເປັນປັດໄຈກໍວ່າງຈາກອັດຕາຫຼືສິ່ງທີ່ເນື່ອງດ້ວຍອັດຕາ ໂສຕະວ່າງຈາກອັດຕາຫຼືສິ່ງທີ່ເນື່ອງດ້ວຍອັດຕາ ฯลฯ ສັດທະວ່າງຈາກອັດຕາຫຼືສິ່ງທີ່ເນື່ອງດ້ວຍອັດຕາ ฯลฯ ຄານະວ່າງຈາກອັດຕາຫຼືສິ່ງທີ່ເນື່ອງດ້ວຍອັດຕາ ฯลฯ ຄັນທະວ່າງຈາກອັດຕາຫຼືສິ່ງທີ່ເນື່ອງດ້ວຍອັດຕາ ฯลฯ ຊິວຫາວ່າງຈາກອັດຕາຫຼືສິ່ງທີ່ເນື່ອງດ້ວຍອັດຕາ ฯลฯ ຣະສະວ່າງຈາກອັດຕາຫຼືສິ່ງທີ່ເນື່ອງດ້ວຍອັດຕາ ฯลฯ ກາຍວ່າງຈາກອັດຕາຫຼືສິ່ງທີ່ເນື່ອງດ້ວຍອັດຕາ ฯลฯ ໂຜດຖັບພະວ່າງຈາກອັດຕາຫຼືສິ່ງທີ່ເນື່ອງດ້ວຍອັດຕາ ฯลฯ ມະນະວ່າງຈາກອັດຕາຫຼືສິ່ງທີ່ເນື່ອງດ້ວຍອັດຕາ ฯลฯ ທໍາມາຣົມວ່າງຈາກອັດຕາຫຼືສິ່ງທີ່ເນື່ອງດ້ວຍອັດຕາ ฯลฯ ມະໂນວິນຍານວ່າງຈາກອັດຕາຫຼືສິ່ງທີ່ເນື່ອງດ້ວຍອັດຕາ ฯลฯ ມະໂນສໍາຜັດວ່າງຈາກອັດຕາຫຼືສິ່ງທີ່ເນື່ອງດ້ວຍອັດຕາ ฯลฯ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກຫຼືບໍ່ແມ່ນສຸກບໍ່ແມ່ນທຸກ ທີ່ເກີດຂຶ້ນຍ້ອນມະໂນສໍາຜັດເປັນປັດໄຈ ກໍວ່າງຈາກອັດຕາຫຼືສິ່ງທີ່ເນື່ອງດ້ວຍອັດຕາ

ອານົນ ຍ້ອນວ່າງຈາກອັດຕາຫຼືສິ່ງທີ່ເນື່ອງດ້ວຍອັດຕາ ດັ່ງນັ້ນ ເຮົາຈຶ່ງຮຽກວ່າ ໂລກວ່າງ" ດັ່ງນີ້ ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ"

[໔໑໕] ສກ. ທ່ານຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດແມ່ນບໍ?

ປຣ. ແມ່ນ

ສກ. ພຣະຜູ້ມີພຣະພາກເຈົ້າຊົງເປັນສັດຈະວາທີ ກາລະວາທີ ພູຕະວາທີ ຕະຖະວາທີ ອະວິຕະຖະວາທີ ອະນັນຍະຖະວາທີ ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ເມື່ອອັດຕາມີຢູ່ ຄວາມຢຶດຖືວ່າ "ສິ່ງທີ່ເນື່ອງດ້ວຍອັດຕາຂອງເຮົາກໍຈະເພິ່ງມີ" ແມ່ນບໍ?

ພິກຂຸທັງຫຼາຍທູນຕອບວ່າ "ແມ່ນ ຂ້ານ້ອຍ

ເມື່ອສິ່ງທີ່ເນື່ອງດ້ວຍອັດຕາມີຢູ່ ຄວາມຢຶດຖືວ່າ "ສິ່ງທີ່ເນື່ອງດ້ວຍອັດຕາຂອງເຮົາກໍຈະເພິ່ງມີ" ແມ່ນບໍ?

ແມ່ນ ຂ້ານ້ອຍ"

ເມື່ອຫາບໍ່ພົບອັດຕາແລະສິ່ງທີ່ເນື່ອງດ້ວຍອັດຕາໂດຍຄວາມເປັນຈິງ ໂດຍຄວາມແນ່ແທ້ ທິດຖິທີ່ວ່າ "ນັ້ນໂລກ ນັ້ນອັດຕາ ເຮົານັ້ນຕາຍແລ້ວຈັກເປັນຜູ້ທ່ຽງ ຍັ່ງຍືນ ຄົງທີ່ ບໍ່ມີຄວາມ ແປຜັນເປັນທຳມະດາ ຈັກດຳລົງຢູ່ທຽບເທົ່າສິ່ງທີ່ຄົງທີ່ແນວນັ້ນ" ນີ້ບໍ່ເປັນພາລະທຳ (ທຳຂອງຄົນໂງ່) ສົມບູນແບບບໍ?

ເປັນຫຍັງຈະບໍ່ເປັນແນວນັ້ນ ນັ້ນເປັນພາລະທຳສົມບູນແບບຢ່າງແນ່ນອນ ຂ້ານ້ອຍ" ດັ່ງນີ້ ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ"

[໔໑໖] ສກ. ທ່ານຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດແມ່ນບໍ?

ປຣ. ແມ່ນ

ສກ. ພຣະຜູ້ມີພຣະພາກເຈົ້າຊົງເປັນສັດຈະວາທີ ກາລະວາທີ ພູຕະວາທີ ຕະຖະວາທີ ອະວິຕະຖະວາທີ ອະນັນຍະຖະວາທີ ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ເສນິຍະ ສາດສະດາ ໓ ຈຳພວກເຫຼົ່ານີ້ມີປາກົດຢູ່ໃນໂລກ

ສາດສະດາ ໓ ຈຳພວກເຫຼົ່າໃດ ຄື

໑. ສາດສະດາບາງຄົນໃນໂລກນີ້ບັນຍັດອັດຕາໃນປັດຈຸບັນໂດຍຄວາມເປັນຂອງມີຈິງ ໂດຍຄວາມເປັນຂອງຍັ່ງຍືນ ແລະບັນຍັດອັດຕາໃນພົບໜ້າໂດຍຄວາມເປັນຂອງມີຈິງ ໂດຍຄວາມເປັນຂອງຍັ່ງຍືນ

໒. ສາດສະດາບາງຄົນໃນໂລກນີ້ບັນຍັດອັດຕາໃນປັດຈຸບັນໂດຍຄວາມເປັນຂອງມີຈິງ ໂດຍຄວາມເປັນຂອງຍັ່ງຍືນ ແຕ່ບໍ່ບັນຍັດອັດຕາໃນພົບໜ້າໂດຍຄວາມເປັນຂອງມີຈິງ ໂດຍຄວາມເປັນຂອງຍັ່ງຍືນ

໓. ສາດສະດາບາງຄົນໃນໂລກນີ້ບໍ່ບັນຍັດອັດຕາໃນປັດຈຸບັນໂດຍຄວາມເປັນຂອງມີຈິງ ໂດຍຄວາມເປັນຂອງຍັ່ງຍືນ ແລະບໍ່ບັນຍັດອັດຕາໃນພົບໜ້າໂດຍຄວາມເປັນຂອງມີຈິງ ໂດຍຄວາມເປັນຂອງຍັ່ງຍືນ

ບັນດາສາດສະດາ ໓ ຈຳພວກນັ້ນ ສາດສະດາທີ່ບັນຍັດອັດຕາໃນປັດຈຸບັນໂດຍຄວາມເປັນຂອງມີຈິງ ໂດຍຄວາມເປັນຂອງຍັ່ງຍືນ ແລະບັນຍັດອັດຕາໃນພົບໜ້າໂດຍຄວາມເປັນຂອງມີຈິງ ໂດຍຄວາມເປັນຂອງຍັ່ງຍືນ (ວາທະ) ນີ້ຮຽກວ່າ ສັດສະຕະວາທະ (ວາທະວ່າອັດຕາ ແລະໂລກທ່ຽງ)

ບັນດາສາດສະດາ ໓ ຈຳພວກນັ້ນ ສາດສະດາທີ່ບັນຍັດອັດຕາໃນປັດຈຸບັນໂດຍຄວາມເປັນຂອງມີຈິງ ໂດຍຄວາມເປັນຂອງຍັ່ງຍືນ ແຕ່ບໍ່ບັນຍັດອັດຕາໃນພົບໜ້າໂດຍຄວາມເປັນຂອງມີຈິງ ໂດຍຄວາມເປັນຂອງຍັ່ງຍືນ (ວາທະ) ນີ້ຮຽກວ່າ ອຸດເສທະວາທະ (ວາທະວ່າອັດຕາແລະໂລກຂາດສູນ)

ບັນດາສາດສະດາ ໓ ຈຳພວກນັ້ນ ສາດສະດາທີ່ບໍ່ບັນຍັດອັດຕາໃນປັດຈຸບັນໂດຍຄວາມເປັນຂອງມີຈິງ ໂດຍຄວາມເປັນຂອງຍັ່ງຍືນ ແລະບໍ່ບັນຍັດອັດຕາໃນພົບໜ້າໂດຍຄວາມເປັນຂອງມີຈິງ ໂດຍຄວາມເປັນຂອງຍັ່ງຍືນ (ວາທະ) ນີ້ຮຽກວ່າ ສຳມາສຳພຸດທະ ສາດສະດາ ໓ ຈຳພວກນີ້ເອງມີຜາກົດຢູ່ໃນໂລກ" ດັ່ງນີ້ ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ"

[໔໓໗] ສກ. ທ່ານຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດແມ່ນບໍ?

ປຣ. ແມ່ນ

ສກ. ພຣະຜູ້ມີພຣະພາກເຈົ້າຊົງເປັນສັດຈະວາທີ ກາລະວາທີ ພູຕະວາທີ ຕະຖະວາທີ ອະວິຕະຖະວາທີ ອະນັນຍະຖະວາທີ ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະຜູ້ມີພຣະພາກເຈົ້າເຄີຍຕັດວ່າ "ໝໍ້ເນີຍໃສ" ແມ່ນບໍ?

ປຣ. ແມ່ນ

ສກ. ໃຜ ໆ ເຮັດໝໍ້ເນີຍໃສມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ"

[໔๓] ສກ. ທ່ານຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດແມ່ນບໍ?

ປຣ. ແມ່ນ

ສກ. ພຣະຜູ້ມີພຣະພາກເຈົ້າຊົງເປັນສັດຈະວາທີ ກາລະວາທີ ພູຕະວາທີ ຕະຖະວາທີ ອະວິຕະຖະວາທີ ອະນັນຍະຖະວາທີ ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະຜູ້ມີພຣະພາກເຈົ້າເຄີຍຕັດວ່າ ໝໍ້ນ້ຳມັນ ฯลฯ ໝໍ້ນ້ຳເຜີ້ງ ฯลฯ ໝໍ້ນ້ຳອ້ອຍ ฯลฯ ໝໍ້ນ້ຳນົມ ฯลฯ ໝໍ້ນ້ຳ ฯลฯ ພາຊະນະນ້ຳດື່ມ ฯลฯ ກະບອກນ້ຳດື່ມ ฯลฯ ຂັນນ້ຳດື່ມ ฯลฯ ນິຕະຍະພັດ ฯลฯ ທຸວະຍາຄູ (ຍາຄູທ່ຽງ) ແມ່ນບໍ?

ປຣ. ແມ່ນ

ສກ. ຍາຄູບາງຢ່າງທ່ຽງ ຍັ່ງຍືນ ຄົງທົນ ບໍ່ແປຜັນໄປເປັນທຳມະດາ ມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ຂ້າພະເຈົ້າຢັ່ງຮູ້ບຸກຄົນໄດ້ໂດຍສັດສິກັດຖະປະຣະມັດ" (ຫຍໍ້)

## ລວມບັນຫາສຳຄັນໃນປຸກຄະລະກະຖາ ๗ ບັນຫາ ຄື

໑. ອັດຖະກະນິກຄະຫະ
໔. ເປີຍຍາລະ
໓. ສັນທາວະນິຍະ (ຄະຕິອະນຸໂຍຄະ)
໔. ອຸປາທາຍະ (ອຸປາທາປັນຍັດຕານຸໂຍຄະ)
໕. ຈິດຕະ
໖. ກັນຍານະ (ປຸຣິສະກາຣານຸໂຍຄະ)
໗. ອິດທິ (ອະພິນຍານຸໂຍຄະ)
໘. ສຸດຕາຫາຣະນະ

**ປຸກຄະລະກະຖາ ຈົບ**

# ໔. ປະຣິຫານິກະຖາ

## ວ່າດ້ວຍຄວາມເສື່ອມ

## ໑. ວາທະຍຸດຕິປະຣິຫານິ

## ວ່າດ້ວຍຫຼັກການໂຕ້ວາທະໃນເລື້ອງຄວາມເສື່ອມ

[໔໓໘] ສກ. ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້ໃນໂອກາດທັງປວງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້ໃນໂອກາດທັງປວງແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳເປັນເຫດເສື່ອມຂອງພຣະອະຣະຫັນ ໃນໂອກາດທັງປວງມີຢູ່ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້ໃນການທັງປວງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້ໃນການທັງປວງແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳເປັນເຫດເສື່ອມຂອງພຣະອະຣະຫັນໃນໂອກາດທັງປວງມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນທຸກອົງເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນທຸກອົງເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳເປັນເຫດເສື່ອມຂອງພຣະອະຣະຫັນທຸກອົງມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນເມື່ອເສື່ອມຈາກອະຣະຫັດຕະຜົນ ຍ່ອມເສື່ອມຈາກຜົນທັງ ໔ ປະການ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ປຣ. ເສດຖີຄອງຄວາມເປັນເສດຖີຢູ່ໄດ້ກໍດ້ວຍຊັບ ໔໐໐,໐໐໐ ເມື່ອຊັບ ໑໐໐,໐໐໐ ໝົດສິ້ນໄປກໍເສື່ອມຈາກຄວາມເປັນເສດຖີແມ່ນບໍ?

ສກ. ແມ່ນ

ປຣ. ເຂົາເສື່ອມຈາກສົມບັດທັງປວງແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ເສດຖີຄອງຄວາມເປັນເສດຖີຢູ່ໄດ້ກໍດ້ວຍຊັບ ໔໐໐,໐໐໐ ເມື່ອຊັບ ໑໐໐,໐໐໐ ໝົດສິ້ນໄປກໍເສື່ອມຈາກສົມບັດທັງປວງແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນເມື່ອເສື່ອມຈາກອະຣະຫັດຕະຜົນ ຍ່ອມເສື່ອມຈາກຜົນທັງ ໔ ປະການ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

**ວາທະຍຸດຕິປະຣິຫານີ ຈົບ**

# ໘. ອະຣິຍະປຸກຄະລະສັງສັນທະນະປະຣິຫານີ

## ວ່າດ້ວຍການທຽບຄຽງພຣະອະຣິຍະບຸກຄົນໃນເລື້ອງຄວາມເສື່ອມ

[໘໔໐] ສກ. ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂສດາບັນເສື່ອມຈາກໂສດາປັດຕິຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສະກະທາຄາມີເສື່ອມຈາກສະກະທາຄາມີຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະນາຄາມີເສື່ອມຈາກອະນາຄາມິຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະນາຄາມີເສື່ອມຈາກອະນາຄາມິຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂສດາບັນເສື່ອມຈາກໂສດາປັດຕິຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະນາຄາມີເສື່ອມຈາກອະນາຄາມິຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສະກະທາຄາມີເສື່ອມຈາກສະກະທາຄາມິຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະສະກະທາຄາມີເສື່ອມຈາກສະກະທາຄາມິຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂສດາບັນເສື່ອມຈາກໂສດາປັດຕິຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະໂສດາບັນບໍ່ເສື່ອມຈາກໂສດາປັດຕິຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນບໍ່ເສື່ອມຈາກອະຣະຫັດຕະຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະສະກະທາຄາມີບໍ່ເສື່ອມຈາກສະກະທາຄາມິຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນບໍ່ເສື່ອມຈາກອະຣະຫັດຕະຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະນາຄາມີບໍ່ເສື່ອມຈາກອະນາຄາມິຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນບໍ່ເສື່ອມຈາກອະຣະຫັດຕະຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະໂສດາບັນບໍ່ເສື່ອມຈາກໂສດາປັດຕິຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະນາຄາມີບໍ່ເສື່ອມຈາກອະນາຄາມິຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະສະກະທາຄາມີບໍ່ເສື່ອມຈາກສະກະທາຄາມິຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະນາຄາມີບໍ່ເສື່ອມຈາກອະນາຄາມິຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະໂສດາບັນບໍ່ເສື່ອມຈາກໂສດາປັດຕິຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະສະກະທາຄາມີບໍ່ເສື່ອມຈາກສະກະທາຄາມິຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໘໑] ສກ. ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນເມື່ອເສື່ອມຈາກອະຣະຫັດຕະຜົນ ຕັ້ງຢູ່ໃນທຳອັນໃດ?

ປຣ. ຕັ້ງຢູ່ໃນອະນາຄາມິຜົນ

ສກ. ພຣະອະນາຄາມີເມື່ອເສື່ອມຈາກອະນາຄາມິຜົນ ຕັ້ງຢູ່ໃນທຳອັນໃດ?

ປຣ. ຕັ້ງຢູ່ໃນສະກະທາຄາມິຜົນ

ສກ. ພຣະສະກະທາຄາມີເມື່ອເສື່ອມຈາກສະກະທາຄາມິຜົນ ຕັ້ງຢູ່ໃນທຳອັນໃດ?

ປຣ. ຕັ້ງຢູ່ໃນໂສດາປັດຕິຜົນ

ສກ. ພຣະໂສດາບັນເມື່ອເສື່ອມຈາກໂສດາປັດຕິຜົນ ຕັ້ງຢູ່ໃນພູມແຫ່ງປຸຖຸຊົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ທ່ານຈົ່ງຮັບນິກຄະຫະ ດັ່ງຕໍ່ໄປນີ້

ຫາກພຣະອະຣະຫັນ ເມື່ອເສື່ອມຈາກອະຣະຫັດຕະຜົນ ຕັ້ງຢູ່ໃນອະນາຄາມິຜົນ ພຣະອະນາຄາມີ ເມື່ອເສື່ອມຈາກອະນາຄາມິຜົນ ຕັ້ງຢູ່ໃນສະກະທາຄາມິຜົນ ພຣະສະກະທາຄາມີ ເມື່ອເສື່ອມຈາກສະກະທາຄາມິຜົນ ຕັ້ງຢູ່ໃນໂສດາປັດຕິຜົນ ດັ່ງນັ້ນ ທ່ານຄວນຍອມຮັບວ່າ "ພຣະໂສດາບັນ ເມື່ອເສື່ອມຈາກໂສດາປັດຕິຜົນ ຕັ້ງຢູ່ໃນພູມແຫ່ງປຸຖຸຊົນ"

ສກ. ພຣະອະຣະຫັນເມື່ອເສື່ອມຈາກອະຣະຫັດຕະຜົນ ຕັ້ງຢູ່ໃນໂສດາປັດຕິຜົນ ແມ່ນບໍ?

ປຣ. ແມ່ນ

ສກ. ຕໍ່ຈາກໂສດາປັດຕິຜົນ ທ່ານກໍເຮັດໃຫ້ແຈ້ງອະຣະຫັດຕະຜົນໄດ້ເລີຍແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໘໔] ສກ. ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂສດາບັນເສື່ອມຈາກໂສດາປັດຕິຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນຫຼືພຣະໂສດາບັນ ໃຜລະກິເລດໄດ້ຫຼາຍກວ່າກັນ

ປຣ. ພຣະອະຣະຫັນ

ສກ. ຫາກພຣະອະຣະຫັນລະກິເລດໄດ້ຫຼາຍກວ່າ ພຣະອະຣະຫັນຍັງເສື່ອມຈາກອະຣະຫັດຕະຜົນໄດ້ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ພຣະໂສດາບັນເສື່ອມຈາກໂສດາປັດຕິຜົນໄດ້"

ສກ. ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສະກະທາຄາມີເສື່ອມຈາກສະກະທາຄາມີຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນຫຼືພຣະສະກະທາຄາມີ ໃຜລະກິເລດໄດ້ຫຼາຍກວ່າກັນ

ປຣ. ພຣະອະຣະຫັນ

ສກ. ຫາກພຣະອະຣະຫັນລະກິເລດໄດ້ຫຼາຍກວ່າ ພຣະອະຣະຫັນຍັງເສື່ອມຈາກອະຣະຫັດຕະຜົນໄດ້ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ພຣະສະກະທາຄາມີເສື່ອມຈາກສະກະທາຄາມີຜົນໄດ້"

ສກ. ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະນາຄາມີເສື່ອມຈາກອະນາຄາມີຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນຫຼືພຣະອະນາຄາມີ ໃຜລະກິເລດໄດ້ຫຼາຍກວ່າກັນ

ປຣ. ພຣະອະຣະຫັນ

ສກ. ຫາກພຣະອະຣະຫັນລະກິເລດໄດ້ຫຼາຍກວ່າ ພຣະອະຣະຫັນຍັງເສື່ອມຈາກອະຣະຫັດຕະຜົນໄດ້ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ພຣະອະນາຄາມີເສື່ອມຈາກອະນາຄາມີຜົນໄດ້"

ສກ. ພຣະອະນາຄາມີເສື່ອມຈາກອະນາຄາມີຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂສດາບັນເສື່ອມຈາກໂສດາປັດຕິຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະນາຄາມີຫຼືພຣະໂສດາບັນ ໃຜລະກິເລດໄດ້ຫຼາຍກວ່າກັນ

ປຣ. ພຣະອະນາຄາມີ

ສກ. ຫາກພຣະອະນາຄາມີລະກິເລດໄດ້ຫຼາຍກວ່າ ພຣະອະນາຄາມີຍັງເສື່ອມຈາກອະນາຄາມີຜົນໄດ້ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ພຣະໂສດາບັນເສື່ອມຈາກໂສດາປັດຕິຜົນໄດ້"

[໔໔໓] ສກ. ພຣະອະນາຄາມີເສື່ອມຈາກອະນາຄາມີຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສະກະທາຄາມີເສື່ອມຈາກສະກະທາຄາມີຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະນາຄາມີຫຼືພຣະສະກະທາຄາມີ ໃຜລະກິເລດໄດ້ຫຼາຍກວ່າກັນ

ປຣ. ພຣະອະນາຄາມີ

ສກ. ຫາກພຣະອະນາຄາມີລະກິເລດໄດ້ຫຼາຍກວ່າ ພຣະອະນາຄາມີຍັງເສື່ອມຈາກອະນາຄາມີຜົນໄດ້ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ພຣະສະກະທາຄາມີກໍເສື່ອມຈາກສະກະທາຄາມີຜົນໄດ້"

ສກ. ພຣະສະກະທາຄາມີເສື່ອມຈາກສະກະທາຄາມີຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂສດາບັນເສື່ອມຈາກໂສດາປັດຕິຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະສະກະທາຄາມີຫຼືພຣະໂສດາບັນ ໃຜລະກິເລດໄດ້ຫຼາຍກວ່າກັນ

ປຣ. ພຣະສະກະທາຄາມີ

ສກ. ຫາກພຣະສະກະທາຄາມີລະກິເລດໄດ້ຫຼາຍກວ່າ ພຣະສະກະທາຄາມີຍັງເສື່ອມຈາກສະກະທາຄາມີຜົນໄດ້ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ພຣະໂສດາບັນເສື່ອມຈາກໂສດາປັດຕິຜົນໄດ້"

[໔໔໔] ສກ. ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂສດາບັນເສື່ອມຈາກໂສດາປັດຕິຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນຫຼືພຣະໂສດາບັນ ໃຜຈະເລີນມັກໄດ້ຍິ່ງກວ່າກັນ

ປຣ. ພຣະອະຣະຫັນ

ສກ. ຫາກພຣະອະຣະຫັນຈະເລີນມັກໄດ້ຍິ່ງກວ່າ ພຣະອະຣະຫັນຍັງເສື່ອມຈາກອະຣະຫັດຕະຜົນໄດ້ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ພຣະໂສດາບັນເສື່ອມຈາກໂສດາປັດຕິຜົນໄດ້"

ສກ. ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂສດາບັນເສື່ອມຈາກໂສດາປັດຕິຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນຫຼືພຣະໂສດາບັນ ໃຜຈະເລີນສະຕິປັດຖານ ຯລຯ ຈະເລີນສຳມັບປະທານ ຯລຯ ຈະເລີນອິດທິບາດ ຯລຯ ຈະເລີນອິນຊີ ຯລຯ ຈະເລີນພະລະ ຯລຯ ຈະເລີນໂພດຊົງໄດ້ຍິ່ງກວ່າກັນ

ປຣ. ພຣະອະຣະຫັນ

ສກ. ຫາກພຣະອະຣະຫັນຈະເລີນໂພດຊົງໄດ້ຍິ່ງກວ່າ ພຣະອະຣະຫັນຍັງເສື່ອມຈາກອະຣະຫັດຕະຜົນໄດ້ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ພຣະໂສດາບັນເສື່ອມຈາກໂສດາປັດຕິຜົນໄດ້"

ສກ. ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສະກະທາຄາມີເສື່ອມຈາກສະກະທາຄາມີຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

ສກ. ພຣະອະຣະຫັນຫຼືພຣະສະກະທາຄາມີ ໃຜຈະເລີນມັກ ຯລຯ ຈະເລີນໂພດຊົງໄດ້ຍິ່ງກວ່າກັນ

ປຣ. ພຣະອະຣະຫັນ

ສກ. ຫາກພຣະອະຣະຫັນຈະເລີນໂພດຊົງໄດ້ຍິ່ງກວ່າ ພຣະອະຣະຫັນຍັງເສື່ອມຈາກອະຣະຫັດຕະຜົນໄດ້ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ພຣະສະກະທາຄາມີເສື່ອມຈາກສະກະທາຄາມີຜົນ ໄດ້"

ສກ. ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະນາຄາມີເສື່ອມຈາກອະນາຄາມີຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

ສກ. ພຣະອະຣະຫັນຫຼືພຣະອະນາຄາມີ ໃຜຈະເລີນມັກ ຯລຯ ຈະເລີນໂພດຊົງໄດ້ ຍິ່ງກວ່າກັນ

ປຣ. ພຣະອະຣະຫັນ

ສກ. ຫາກພຣະອະຣະຫັນຈະເລີນໂພດຊົງໄດ້ຍິ່ງກວ່າ ພຣະອະຣະຫັນຍັງເສື່ອມຈາກອະຣະຫັດຕະຜົນໄດ້ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ພຣະອະນາຄາມີເສື່ອມຈາກອະນາຄາມີຜົນໄດ້"

[໘໔໕] ສກ. ພຣະອະນາຄາມີເສື່ອມຈາກອະນາຄາມີຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂສດາບັນເສື່ອມຈາກໂສດາປັດຕິຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

ສກ. ພຣະອະນາຄາມີຫຼືພຣະໂສດາບັນ ໃຜຈະເລີນມັກ ຯລຯ ຈະເລີນໂພດຊົງໄດ້ ຍິ່ງກວ່າກັນ

ປຣ. ພຣະອະນາຄາມີ

ສກ. ຫາກພຣະອະນາຄາມີຈະເລີນໂພດຊົງໄດ້ຍິ່ງກວ່າ ພຣະອະນາຄາມີຍັງເສື່ອມຈາກອະນາຄາມີຜົນໄດ້ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ພຣະໂສດາບັນເສື່ອມຈາກໂສດາປັດຕິຜົນໄດ້"

ສກ. ພຣະອະນາຄາມີເສື່ອມຈາກອະນາຄາມິຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສະກະທາຄາມີເສື່ອມຈາກສະກະທາຄາມິຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະນາຄາມີຫຼືພຣະສະກະທາຄາມີ ໃຜຈະເລີນມັກ ຯລຯ ຈະເລີນໂພດຊົງໄດ້ຍິ່ງກວ່າກັນ

ປຣ. ພຣະອະນາຄາມີ

ສກ. ຫາກພຣະອະນາຄາມີຈະເລີນໂພດຊົງໄດ້ຍິ່ງກວ່າ ພຣະອະນາຄາມີຍັງເສື່ອມຈາກອະນາຄາມິຜົນໄດ້ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ພຣະສະກະທາຄາມີເສື່ອມຈາກສະກະທາຄາມິຜົນໄດ້"

[໘໘໙] ສກ. ພຣະສະກະທາຄາມີເສື່ອມຈາກສະກະທາຄາມິຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂສດາບັນເສື່ອມຈາກໂສດາປັດຕິຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະສະກະທາຄາມີຫຼືພຣະໂສດາບັນ ໃຜຈະເລີນມັກ ຯລຯ ຈະເລີນໂພດຊົງໄດ້ຍິ່ງກວ່າກັນ

ປຣ. ພຣະສະກະທາຄາມີ

ສກ. ຫາກພຣະສະກະທາຄາມີຈະເລີນໂພດຊົງໄດ້ຍິ່ງກວ່າ ພຣະສະກະທາຄາມີຍັງເສື່ອມຈາກສະກະທາຄາມິຜົນໄດ້ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ພຣະໂສດາບັນເສື່ອມຈາກໂສດາປັດຕິຜົນ ໄດ້ ຯລຯ"

[໘໘໗] ສກ. ພຣະອະຣະຫັນເຫັນທຸກແລ້ວຍັງເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂສດາບັນເຫັນທຸກແລ້ວຍັງເສື່ອມຈາກໂສດາປັດຕິຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນເຫັນສະມຸໄທແລ້ວຍັງເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂສດາບັນເຫັນສະມຸໄທແລ້ວຍັງເສື່ອມຈາກໂສດາປັດຕິຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນເຫັນນິໂຣດແລ້ວຍັງເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂສດາບັນເຫັນນິໂຣດແລ້ວຍັງເສື່ອມຈາກໂສດາປັດຕິຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນເຫັນມັກແລ້ວຍັງເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂສດາບັນເຫັນມັກແລ້ວຍັງເສື່ອມຈາກໂສດາປັດຕິຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນເຫັນສັດຈະ ໔ ແລ້ວຍັງເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂສດາບັນເຫັນສັດຈະ ໔ ແລ້ວຍັງເສື່ອມຈາກໂສດາປັດຕິຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນເຫັນທຸກແລ້ວຍັງເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສະກະທາຄາມີເຫັນທຸກແລ້ວຍັງເສື່ອມຈາກສະກະທາຄາມີຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນເຫັນສະມຸໄທ ຯລຯ ເຫັນນິໂຣດ ຯລຯ ເຫັນມັກ ຯລຯ ເຫັນສັດຈະ ໔ ແລ້ວຍັງເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສະກະທາຄາມີເຫັນສັດຈະ ໔ ແລ້ວຍັງເສື່ອມຈາກສະກະທາຄາມີຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນເຫັນທຸກແລ້ວຍັງເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະນາຄາມີເຫັນທຸກແລ້ວຍັງເສື່ອມຈາກອະນາຄາມີຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນເຫັນສະມຸໄທ ຯລຯ ເຫັນນິໂຣດ ຯລຯ ເຫັນມັກ ຯລຯ ເຫັນສັດຈະ ໔ ແລ້ວຍັງເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະນາຄາມີເຫັນສັດຈະ ໔ ແລ້ວຍັງເສື່ອມຈາກອະນາຄາມີຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໔໗] ສກ. ພຣະອະນາຄາມີເຫັນທຸກແລ້ວຍັງເສື່ອມຈາກອະນາຄາມີຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂສດາບັນເຫັນທຸກແລ້ວຍັງເສື່ອມຈາກໂສດາປັດຕິຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະນາຄາມີເຫັນສະມຸໄທ ຯລຯ ເຫັນນິໂຣດ ຯລຯ ເຫັນມັກ ຯລຯ ເຫັນສັດຈະ ໔ ແລ້ວຍັງເສື່ອມຈາກອະນາຄາມີຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂສດາບັນເຫັນສັດຈະ ໔ ແລ້ວຍັງເສື່ອມຈາກໂສດາປັດຕິຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະນາຄາມີເຫັນທຸກແລ້ວຍັງເສື່ອມຈາກອະນາຄາມີຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສະກະທາຄາມີເຫັນທຸກແລ້ວຍັງເສື່ອມຈາກສະກະທາຄາມີຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະນາຄາມີເຫັນສະມຸໄທ ຯລຯ ເຫັນນິໂຣດ ຯລຯ ເຫັນມັກ ຯລຯ ເຫັນສັດຈະ ໔ ແລ້ວຍັງເສື່ອມຈາກອະນາຄາມີຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສະກະທາຄາມີເຫັນສັດຈະ ໔ ແລ້ວຍັງເສື່ອມຈາກສະກະທາຄາມີຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໔໙] ສກ. ພຣະສະກະທາຄາມີເຫັນທຸກແລ້ວຍັງເສື່ອມຈາກສະກະທາຄາມີຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂສດາບັນເຫັນທຸກແລ້ວຍັງເສື່ອມຈາກໂສດາປັດຕິຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະສະກະທາຄາມີເຫັນສະມຸໄທ ຯລຯ ເຫັນນິໂຣດ ຯລຯ ເຫັນມັກ ຯລຯ ເຫັນສັດຈະ ໔ ແລ້ວຍັງເສື່ອມຈາກສະກະທາຄາມີຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂສດາບັນເຫັນສັດຈະ ໔ ແລ້ວຍັງເສື່ອມຈາກໂສດາປັດຕິຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໕໐] ສກ. ພຣະໂສດາບັນເຫັນທຸກແລ້ວບໍ່ເສື່ອມຈາກໂສດາປັດຕິຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນເຫັນທຸກແລ້ວບໍ່ເສື່ອມຈາກອະຣະຫັດຕະຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະໂສດາບັນເຫັນສະມຸໄທ ຯລຯ ເຫັນນິໂຣດ ຯລຯ ເຫັນມັກ ຯລຯ ເຫັນສັດຈະ ໔ ແລ້ວບໍ່ເສື່ອມຈາກໂສດາປັດຕິຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນເຫັນສັດຈະ ໔ ແລ້ວບໍ່ເສື່ອມຈາກອະຣະຫັດຕະຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະສະກະທາຄາມີເຫັນທຸກ ຯລຯ ເຫັນສັດຈະ ໔ ແລ້ວບໍ່ເສື່ອມຈາກສະກະທາຄາມີຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນເຫັນສັດຈະ ໔ ແລ້ວບໍ່ເສື່ອມຈາກອະຣະຫັດຕະຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະນາຄາມີເຫັນທຸກ ຯລຯ ເຫັນສັດຈະ ໔ ແລ້ວບໍ່ເສື່ອມຈາກອະນາຄາມີຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນເຫັນສັດຈະ ໔ ແລ້ວບໍ່ເສື່ອມຈາກອະຣະຫັດຕະຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະໂສດາບັນເຫັນທຸກ ຯລຯ ເຫັນສັດຈະ ໔ ແລ້ວບໍ່ເສື່ອມຈາກໂສດາປັດຕິຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະນາຄາມີເຫັນທຸກ ຯລຯ ເຫັນສັດຈະ ໔ ແລ້ວບໍ່ເສື່ອມຈາກອະນາຄາມີຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະສະກະທາຄາມີເຫັນທຸກ ຯລຯ ເຫັນສັດຈະ ໔ ແລ້ວບໍ່ເສື່ອມຈາກສະກະທາຄາມີຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະນາຄາມີເຫັນທຸກ ຯລຯ ເຫັນສັດຈະ ໔ ແລ້ວບໍ່ເສື່ອມຈາກອະນາຄາມີຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະໂສດາບັນເຫັນທຸກ ຯລຯ ເຫັນສັດຈະ ໔ ແລ້ວບໍ່ເສື່ອມຈາກໂສດາປັດຕິຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະສະກະທາຄາມີເຫັນທຸກ ຯລຯ ເຫັນສັດຈະ ໔ ແລ້ວບໍ່ເສື່ອມຈາກສະກະທາຄາມີຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໕໑] ສກ. ພຣະອະຣະຫັນລະຣາຄະໄດ້ແລ້ວຍັງເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂສດາບັນລະສັກກາຍະທິດຖິໄດ້ແລ້ວຍັງເສື່ອມຈາກໂສດາປັດຕິຜົນໄດ້ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນລະຣາຄະໄດ້ແລ້ວຍັງເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂສດາບັນລະວິຈິກິດສາ ຯລຯ ລະສີລັບພະຕະປະຣາມາດ ຯລຯ ລະຣາຄະທີ່ເປັນເຫດໃຫ້ສັດໄປສູ່ອະບາຍ ຯລຯ ລະໂທສະທີ່ເປັນເຫດໃຫ້ສັດໄປສູ່ອະບາຍ ຯລຯ ລະໂມຫະທີ່ເປັນເຫດໃຫ້ສັດໄປສູ່ອະບາຍໄດ້ແລ້ວ ຍັງເສື່ອມຈາກໂສດາປັດຕິຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນລະໂທສະ ຯລຯ ລະໂມຫະ ຯລຯ ລະມານະ ຯລຯ ລະທິດຖິ ຯລຯ ລະວິຈິກິດສາ ຯລຯ ລະຖີນະ ຯລຯ ລະອຸດທັດຈະ ຯລຯ ລະອະຫິຣິກະ ຯລຯ ລະອະໂນດຕັບປະໄດ້ແລ້ວຍັງເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂສດາບັນລະສັກກາຍະທິດຖິໄດ້ແລ້ວ ຍັງເສື່ອມຈາກໂສດາປັດຕິຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນລະອະໂນດຕັບປະໄດ້ແລ້ວ ຍັງເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂສດາບັນລະວິຈິກິດສາ ຯລຯ ລະສີລັບພະຕະປະຣາມາດ ຯລຯ ລະຣາຄະທີ່ເປັນເຫດໃຫ້ສັດໄປສູ່ອະບາຍ ຯລຯ ລະໂທສະທີ່ເປັນເຫດໃຫ້ສັດໄປສູ່ອະບາຍ ຯລຯ ລະໂມຫະທີ່ເປັນເຫດໃຫ້ສັດໄປສູ່ອະບາຍໄດ້ແລ້ວຍັງເສື່ອມຈາກໂສດາປັດຕິຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນລະຣາຄະໄດ້ແລ້ວ ຍັງເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສະກະທາຄາມີລະສັກກາຍະທິດຖິໄດ້ແລ້ວ ຍັງເສື່ອມຈາກສະກະທາຄາມີຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນລະຣາຄະໄດ້ແລ້ວ ຍັງເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສະກະທາຄາມີລະວິຈິກິດສາ ຯລຯ ລະສີລັບພະຕະປະຣາມາດ ຯລຯ ລະການຣາຄະ ຢ່າງຫຍາບ ຯລຯ ລະພະຍາບາດຢ່າງຫຍາບໄດ້ແລ້ວຍັງເສື່ອມຈາກສະກະທາຄາມິຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນລະໂທສະ ຯລຯ ລະອະໂນດຕັບປະໄດ້ແລ້ວຍັງເສື່ອມຈາກອະຣະຫັດຕະຜົນ ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສະກະທາຄາມີລະສັກກາຍະທິດຖິ ຯລຯ ລະພະຍາບາດຢ່າງຫຍາບໄດ້ແລ້ວຍັງເສື່ອມຈາກສະກະທາຄາມິຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນລະຣາຄະໄດ້ແລ້ວຍັງເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະນາຄາມີລະສັກກາຍະທິດຖິໄດ້ແລ້ວຍັງເສື່ອມຈາກອະນາຄາມິຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນລະຣາຄະໄດ້ແລ້ວຍັງເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະນາຄາມີລະວິຈິກິດສາ ຯລຯ ລະສີລັບພະຕະປະຣາມາດ ຯລຯ ລະການຣາຄະ ຢ່າງລະອຽດ ຯລຯ ລະພະຍາບາດຢ່າງລະອຽດໄດ້ແລ້ວຍັງເສື່ອມຈາກອະນາຄາມິຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນລະໂທສະ ຯລຯ ລະອະໂນດຕັບປະໄດ້ແລ້ວຍັງເສື່ອມຈາກອະຣະຫັດຕະຜົນ ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະນາຄາມີລະສັກກາຍະທິດຖິ ຯລຯ ລະພະຍາບາດຢ່າງລະອຽດໄດ້ແລ້ວຍັງເສື່ອມຈາກອະນາຄາມິຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໕໔] ສກ. ພຣະອະນາຄາມີລະສັກກາຍະທິດຖິໄດ້ແລ້ວ ຍັງເສື່ອມຈາກອະນາຄາມິຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂສດາບັນລະສັກກາຍະທິດຖິໄດ້ແລ້ວ ຍັງເສື່ອມຈາກໂສດາປັດຕິຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແບວນັ້ນ ຯລຯ

ສກ. ພຣະອະນາຄາມີລະສັກກາຍະທິດຖິໄດ້ແລ້ວ ຍັງເສື່ອມຈາກອະນາຄາມີຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂສດາບັນລະວິຈິກິດສາ ຯລຯ ລະໂມຫະທີ່ເປັນເຫດໃຫ້ສັດໄປສູ່ອະບາຍໄດ້ແລ້ວ ຍັງເສື່ອມຈາກໂສດາປັດຕິຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແບວນັ້ນ ຯລຯ

ສກ. ພຣະອະນາຄາມີລະວິຈິກິດສາ ຯລຯ ລະພະຍາບາດຢ່າງລະອຽດໄດ້ແລ້ວຍັງເສື່ອມຈາກອະນາຄາມີຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂສດາບັນລະສັກກາຍະທິດຖິ ຯລຯ ລະໂມຫະທີ່ເປັນເຫດໃຫ້ສັດໄປສູ່ອະບາຍໄດ້ແລ້ວ ຍັງເສື່ອມຈາກໂສດາປັດຕິຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແບວນັ້ນ ຯລຯ

ສກ. ພຣະອະນາຄາມີລະສັກກາຍະທິດຖິໄດ້ແລ້ວ ຍັງເສື່ອມຈາກອະນາຄາມີຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສະກະທາຄາມີລະສັກກາຍະທິດຖິໄດ້ແລ້ວ ຍັງເສື່ອມຈາກສະກະທາຄາມີຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແບວນັ້ນ ຯລຯ

ສກ. ພຣະອະນາຄາມີລະສັກກາຍະທິດຖິໄດ້ແລ້ວ ຍັງເສື່ອມຈາກອະນາຄາມີຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສະກະທາຄາມີລະວິຈິກິດສາ ຯລຯ ລະສີລັບພະຕະປະຣາມາດ ຯລຯ ລະກາມຣາຄະ ຢ່າງຫຍາບ ຯລຯ ລະພະຍາບາດຢ່າງຫຍາບໄດ້ແລ້ວຍັງເສື່ອມຈາກສະກະທາຄາມີຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແບວນັ້ນ ຯລຯ

ສກ. ພຣະອະນາຄາມີລະວິຈິກິດສາ ຯລຯ ລະພະຍາບາດຢ່າງລະອຽດໄດ້ແລ້ວຍັງເສື່ອມຈາກອະນາຄາມີຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສະກະທາຄາມີລະສັກກາຍະທິດຖິ ຯລຯ ລະພະຍາບາດຢ່າງຫຍາບໄດ້ແລ້ວ ຍັງເສື່ອມຈາກສະກະທາຄາມີຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແບວນັ້ນ ຯລຯ

[໔໕໓] ສກ. ພຣະສະກະທາຄາມີລະສັກກາຍະທິດຖິໄດ້ແລ້ວ ຍັງເສື່ອມຈາກສະກະທາຄາມີຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂສດາບັນລະສັກກາຍະທິດຖິໄດ້ແລ້ວ ຍັງເສື່ອມຈາກໂສດາປັດຕິຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ພຣະສະກະທາຄາມີລະສັກກາຍະທິດຖິໄດ້ແລ້ວ ຍັງເສື່ອມຈາກສະກະທາຄາມີຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂສດາບັນລະວິຈິກິດສາ ฯลฯ ລະໂມຫະທີ່ເປັນເຫດໃຫ້ສັດໄປສູ່ອະບາຍໄດ້ແລ້ວ ຍັງເສື່ອມຈາກໂສດາປັດຕິຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ພຣະສະກະທາຄາມີລະວິຈິກິດສາ ฯลฯ ລະກາມຣາຄະຢ່າງຫຍາບ ฯลฯ ລະພະຍາບາດຢ່າງຫຍາບໄດ້ແລ້ວ ຍັງເສື່ອມຈາກສະກະທາຄາມີຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂສດາບັນລະສັກກາຍະທິດຖິ ฯลฯ ລະໂມຫະທີ່ເປັນເຫດໃຫ້ສັດໄປສູ່ອະບາຍໄດ້ແລ້ວຍັງເສື່ອມຈາກໂສດາປັດຕິຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

[໔໕໔] ສກ. ພຣະໂສດາບັນລະສັກກາຍະທິດຖິໄດ້ແລ້ວບໍ່ເສື່ອມຈາກໂສດາປັດຕິຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນລະຣາຄະໄດ້ແລ້ວບໍ່ເສື່ອມຈາກອະຣະຫັດຕະຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ພຣະໂສດາບັນລະສັກກາຍະທິດຖິໄດ້ແລ້ວບໍ່ເສື່ອມຈາກໂສດາປັດຕິຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນລະໂທສະ ฯลฯ ລະອະໂນດຕັບປະໄດ້ແລ້ວບໍ່ເສື່ອມຈາກອະຣະຫັດຕະຜົນ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ພຣະໂສດາບັນລະວິຈິກິດສາ ฯลฯ ລະໂມຫະທີ່ເປັນເຫດໃຫ້ສັດໄປສູ່ອະບາຍໄດ້ແລ້ວ ບໍ່ເສື່ອມຈາກໂສດາປັດຕິຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນລະຣາຄະ ฯลฯ ລະອະໂນດຕັບປະໄດ້ແລ້ວບໍ່ເສື່ອມຈາກອະຣະຫັດຕະຜົນ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໕໕] ສກ. ພຣະສະກະທາຄາມີລະສັກກາຍະທິດຖິໄດ້ແລ້ວ ບໍ່ເສື່ອມຈາກສະກະທາຄາມີຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນລະຣາຄະ ຯລຯ ລະອະໂນດຕັບປະໄດ້ແລ້ວບໍ່ເສື່ອມຈາກອະຣະຫັດຕະຜົນ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະສະກະທາຄາມີລະວິຈິກິດສາ ຯລຯ ລະພະຍາບາດຢ່າງຫຍາບໄດ້ແລ້ວບໍ່ເສື່ອມຈາກສະກະທາຄາມີຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນລະຣາຄະ ຯລຯ ລະອະໂນດຕັບປະໄດ້ແລ້ວບໍ່ເສື່ອມຈາກອະຣະຫັດຕະຜົນ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໕໖] ສກ. ພຣະອະນາຄາມີລະສັກກາຍະທິດຖິໄດ້ແລ້ວ ບໍ່ເສື່ອມຈາກອະນາຄາມີຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນລະຣາຄະ ຯລຯ ລະອະໂນດຕັບປະໄດ້ແລ້ວບໍ່ເສື່ອມຈາກອະຣະຫັດຕະຜົນ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະນາຄາມີລະວິຈິກິດສາ ຯລຯ ລະພະຍາບາດຢ່າງລະອຽດໄດ້ແລ້ວບໍ່ເສື່ອມຈາກອະນາຄາມີຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນລະຣາຄະ ຯລຯ ລະອະໂນດຕັບປະໄດ້ແລ້ວບໍ່ເສື່ອມຈາກອະຣະຫັດຕະຜົນ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໕໗] ສກ. ພຣະໂສດາບັນລະສັກກາຍະທິດຖິໄດ້ແລ້ວ ບໍ່ເສື່ອມຈາກໂສດາປັດຕິຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະນາຄາມີລະສັກກາຍະທິດຖິ ຯລຯ ລະພະຍາບາດຢ່າງລະອຽດໄດ້ແລ້ວບໍ່ເສື່ອມຈາກອະນາຄາມີຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະໂສດາບັນລະວິຈິກິດສາ ຯລຯ ລະໂມຫະທີ່ເປັນເຫດໃຫ້ສັດໄປສູ່ອະບາຍໄດ້ແລ້ວ ບໍ່ເສື່ອມຈາກໂສດາປັດຕິຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະນາຄາມີລະສັກກາຍະທິດຖິ ຯລຯ ລະພະຍາບາດຢ່າງລະອຽດໄດ້ແລ້ວບໍ່ເສື່ອມຈາກອະນາຄາມີຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໕໗] ສກ. ພຣະສະກະທາຄາມີລະສັກກາຍະທິດຖິໄດ້ແລ້ວ ບໍ່ເສື່ອມຈາກສະກະທາຄາມີຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະນາຄາມີລະສັກກາຍະທິດຖິ ຯລຯ ລະພະຍາບາດຢ່າງລະອຽດໄດ້ແລ້ວບໍ່ເສື່ອມຈາກອະນາຄາມີຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະສະກະທາຄາມີລະວິຈິກິດສາ ຯລຯ ລະພະຍາບາດຢ່າງຫຍາບໄດ້ແລ້ວບໍ່ເສື່ອມຈາກສະກະທາຄາມີຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະນາຄາມີລະສັກກາຍະທິດຖິ ຯລຯ ລະພະຍາບາດຢ່າງລະອຽດໄດ້ແລ້ວບໍ່ເສື່ອມຈາກອະນາຄາມີຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໕໘] ສກ. ພຣະໂສດາບັນລະສັກກາຍະທິດຖິໄດ້ແລ້ວ ບໍ່ເສື່ອມຈາກໂສດາປັດຕິຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະສະກະທາຄາມີລະສັກກາຍະທິດຖິ ຯລຯ ລະພະຍາບາດຢ່າງຫຍາບໄດ້ແລ້ວບໍ່ເສື່ອມຈາກສະກະທາຄາມີຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະໂສດາບັນລະວິຈິກິດສາ ຯລຯ ລະໂມຫະທີ່ເປັນເຫດໃຫ້ສັດໄປສູ່ອະບາຍໄດ້ແລ້ວ ບໍ່ເສື່ອມຈາກໂສດາປັດຕິຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະສະກະທາຄາມີລະສັກກາຍະທິດຖິ ຯລຯ ລະພະຍາບາດຢ່າງຫຍາບໄດ້ແລ້ວບໍ່ເສື່ອມຈາກສະກະທາຄາມີຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໘໓໐] ສກ. ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຣາຄະພຣະອະຣະຫັນລະໄດ້ແລ້ວ ຕັດຮາກກົ່ນເຫງົ້າ ເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີເກີດຂຶ້ນຕໍ່ໄປບໍ່ໄດ້ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຣາຄະພຣະອະຣະຫັນລະໄດ້ແລ້ວ ຕັດຮາກກົ່ນເຫງົ້າ ເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ທ່ານກໍບໍ່ຄວນຍອມຮັບວ່າ "ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້"

ສກ. ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ໂທສະພຣະອະຣະຫັນລະໄດ້ແລ້ວ ຯລຯ ໂມຫະພຣະອະຣະຫັນລະໄດ້ແລ້ວ ຯລຯ ມານະ ພຣະອະຣະຫັນລະໄດ້ແລ້ວ ຯລຯ ທິດຖິພຣະອະຣະຫັນລະໄດ້ແລ້ວ ຯລຯ ວິຈິກິດສາພຣະອະຣະຫັນລະໄດ້ແລ້ວ ຯລຯ ຖີນະພຣະອະຣະຫັນລະໄດ້ແລ້ວ ຯລຯ ອຸດທັດຈະພຣະອະຣະຫັນລະໄດ້ແລ້ວ ຯລຯ ອະຫິຣິກະ ພຣະອະຣະຫັນລະໄດ້ແລ້ວ ຯລຯ ອະໂນດຕັບປະພຣະອະຣະຫັນລະໄດ້ແລ້ວ ຕັດຮາກກົ່ນເຫງົ້າ ເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກອະໂນດຕັບປະພຣະອະຣະຫັນລະໄດ້ແລ້ວ ຕັດຮາກກົ່ນເຫງົ້າ ເໝືອນຕົ້ນຕານທີ່ ຖືກຕັດຮາກກົ່ນເຫງົ້າໄປແລ້ວເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ທ່ານກໍບໍ່ຄວນຍອມຮັບວ່າ "ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້"

ສກ. ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຈະເລີນມັກເພື່ອລະຣາຄະບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະອະຣະຫັນຈະເລີນມັກເພື່ອລະຣາຄະ ທ່ານກໍບໍ່ຄວນຍອມຮັບວ່າ "ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້"

ສກ. ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຈະເລີນສະຕິປັດຖານ ຯລຯ ຈະເລີນສຳມັບປະທານ ຯລຯ ຈະເລີນອິດທິບາດ ຯລຯ ຈະເລີນອິນຊີ ຯລຯ ຈະເລີນພະລະ ຯລຯ ຈະເລີນໂພດຊົງເພື່ອລະຣາຄະບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະອະຣະຫັນຈະເລີນໂພດຊົງເພື່ອລະຣາຄະ ທ່ານກໍບໍ່ຄວນຍອມຮັບວ່າ "ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້"

ສກ. ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຈະເລີນມັກ ຯລຯ ຈະເລີນໂພດຊົງເພື່ອລະໂທສະ ຯລຯ ເພື່ອລະອະໂນດຕັບປະບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະອະຣະຫັນຈະເລີນໂພດຊົງເພື່ອລະອະໂນດຕັບປະ ທ່ານກໍບໍ່ຄວນຍອມຮັບວ່າ "ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້"

[໔໖໑] ສກ. ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນເປັນຜູ້ປາສະຈາກຣາຄະ ໂທສະ ໂມຫະ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາລະແລ້ວ ບັນລຸປະໂຫຍດຕົນແລ້ວ ໝົດສິ້ນກິເລດເປັນເຄື່ອງຜູກສັດໄວ້ໃນພົບແລ້ວ ລຸດພົ້ນຍ້ອນຮູ້ຊອບແລ້ວ ຖອດຫຼົ້ມສະລັກ ຖົມຄູ ຖອນເສົາຣະນຽດໄດ້ແລ້ວ ບໍ່ມີບານປະຕູ ເປັນພຣະອະຣິຍະ ປົດທຸງຄືມານະ ວາງພາລະຄືຂັນ ໝົດເຄື່ອງຜູກພັນ ຊະນະຢ່າງວິເສດແລ້ວ ທ່ານກຳນົດຮູ້ທຸກ ລະສະມຸໄທ ເຮັດໃຫ້ແຈ້ງນິໂຣດ ຈະເລີນມັກແລ້ວ ຮູ້ຍິ່ງທຳທີ່ຄວນຮູ້ຍິ່ງກຳນົດຮູ້ທຳທີ່ຄວນກຳນົດຮູ້ ລະທຳທີ່ຄວນລະ ຈະເລີນທຳທີ່ຄວນຈະເລີນ ເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງແລ້ວບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະອະຣະຫັນເປັນຜູ້ປາສະຈາກຣາຄະ ໂທສະ ໂມຫະ ຯລຯ ເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງ ທ່ານກໍບໍ່ຄວນຍອມຮັບວ່າ "ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້"

[໔໖໔] ສກ. ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ພຣະອະຣະຫັນຜູ້ເປັນສະມະຍະວິມຸດ ເສື່ອມຈາກອະຣະຫັດຕະຜົນໄດ້ ຜູ້ເປັນອະສະມະຍະວິມຸດ ບໍ່ເສື່ອມຈາກອະຣະຫັດຕະຜົນ

ສກ. ພຣະອະຣະຫັນຜູ້ເປັນສະມະຍະວິມຸດເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຜູ້ເປັນອະສະມະຍະວິມຸດເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ພຣະອະຣະຫັນຜູ້ເປັນອະສະມະຍະວິມຸດບໍ່ເສື່ອມຈາກອະຣະຫັດຕະຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຜູ້ເປັນສະມະຍະວິມຸດບໍ່ເສື່ອມຈາກອະຣະຫັດຕະຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ພຣະອະຣະຫັນຜູ້ເປັນສະມະຍະວິມຸດລະຣາຄະໄດ້ແລ້ວ ຍັງເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຜູ້ເປັນອະສະມະຍະວິມຸດລະຣາຄະໄດ້ແລ້ວ ຍັງເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ພຣະອະຣະຫັນຜູ້ເປັນສະມະຍະວິມຸດລະໂທສະ ຯລຯ ລະອະໂນດຕັບປະໄດ້ແລ້ວ ຍັງເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຜູ້ເປັນອະສະມະຍະວິມຸດລະໂທສະ ຯລຯ ລະອະໂນດຕັບປະໄດ້ແລ້ວ ຍັງເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ພຣະອະຣະຫັນຜູ້ເປັນສະມະຍະວິມຸດຈະເລີນມັກ ເພື່ອລະຣາຄະ ຍັງເສື່ອມຈາກອະຣະຫັດຕະຜົນ ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຜູ້ເປັນອະສະມະຍະວິມຸດຈະເລີນມັກ ເພື່ອລະຣາຄະ ຍັງເສື່ອມຈາກອະຣະຫັດຕະຜົນ ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ພຣະອະຣະຫັນຜູ້ເປັນສະມະຍະວິມຸດຈະເລີນສະຕິປັດຖານ ຯລຯ ຈະເລີນສຳມັບປະທານ ຯລຯ ຈະເລີນອິດທິບາດ ຯລຯ ຈະເລີນອິນຊີ ຯລຯ ຈະເລີນພະລະ ຯລຯ ຈະເລີນໂພດຊົງເພື່ອລະຣາຄະ ຍັງເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຜູ້ເປັນອະສະມະຍະວິມຸດຈະເລີນສະຕິປັດຖານ ຯລຯ ຈະເລີນໂພດຊົງເພື່ອລະຣາຄະ ຍັງເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ພຣະອະຣະຫັນຜູ້ເປັນສະມະຍະວິມຸດຈະເລີນມັກ ໆລໆ ຈະເລີນໂພດຊົງເພື່ອລະໂທສະ ໆລໆ ເພື່ອລະອະໂນດຕັບປະ ຍັງເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຜູ້ເປັນອະສະມະຍະວິມຸດຈະເລີນມັກ ໆລໆ ຈະເລີນໂພດຊົງເພື່ອລະອະໂນດຕັບປະ ຍັງເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ພຣະອະຣະຫັນຜູ້ເປັນສະມະຍະວິມຸດເປັນຜູ້ປາສະຈາກຣາຄະ ໂທສະ ໂມຫະ ເຮັດກິດ ທີ່ຄວນເຮັດສຳເລັດແລ້ວ ປົງພາລະແລ້ວ ບັນລຸປະໂຫຍດຕົນແລ້ວ ໝົດສິ້ນກິເລດເປັນເຄື່ອງຜູກສັດໄວ້ໃນພົບແລ້ວ ລຸດພົ້ນຍ້ອນຮູ້ຊອບແລ້ວ ຖອດຫຼິ້ມສະລັກ ຖົມຄູ ຖອນເສົາຣະນຽດໄດ້ແລ້ວ ບໍ່ມີບານປະຕູ ເປັນພຣະອະຣິຍະ ປົດທຸງຄືມານະ ວາງພາລະຄືຂັນ ໝົດເຄື່ອງຜູກພັນຊະນະຢ່າງວິເສດແລ້ວ ທ່ານກຳນົດຮູ້ທຸກ ລະສະມຸໄທ ເຮັດໃຫ້ແຈ້ງນິໂຣດ ຈະເລີນມັກ ແລ້ວ ຮູ້ຍິ່ງທຳທີ່ຄວນຮູ້ຍິ່ງ ກຳນົດຮູ້ທຳທີ່ຄວນກຳນົດຮູ້ ລະທຳທີ່ຄວນລະ ຈະເລີນທຳ ທີ່ຄວນຈະເລີນເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງແລ້ວ ຍັງເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຜູ້ເປັນອະສະມະຍະວິມຸດເປັນຜູ້ປາສະຈາກຣາຄະ ໂທສະ ໂມຫະ ໆລໆ ເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງແລ້ວ ຍັງເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

[໔໖໓] ສກ. ພຣະອະຣະຫັນຜູ້ເປັນອະສະມະຍະວິມຸດລະຣາຄະໄດ້ແລ້ວບໍ່ເສື່ອມຈາກອະຣະຫັດຕະຜົນ ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຜູ້ເປັນສະມະຍະວິມຸດລະຣາຄະໄດ້ແລ້ວບໍ່ເສື່ອມຈາກອະຣະຫັດຕະຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ພຣະອະຣະຫັນຜູ້ເປັນອະສະມະຍະວິມຸດລະໂທສະ ໆລໆ ລະອະໂນດຕັບປະໄດ້ແລ້ວບໍ່ເສື່ອມຈາກອະຣະຫັດຕະຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຜູ້ເປັນສະມະຍະວິມຸດລະອະໂນດຕັບປະໄດ້ແລ້ວບໍ່ເສື່ອມຈາກອະຣະຫັດຕະຜົນ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ພຣະອະຣະຫັນຜູ້ເປັນອະສະມະຍະວິມຸດຈະເລີນມັກ ຯລຯ ຈະເລີນໂພດຊົງເພື່ອລະຣາຄະໄດ້ແລ້ວບໍ່ເສື່ອມຈາກອະຣະຫັດຕະຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຜູ້ເປັນສະມະຍະວິມຸດຈະເລີນມັກ ຯລຯ ຈະເລີນໂພດຊົງເພື່ອລະຣາຄະແລ້ວບໍ່ເສື່ອມຈາກອະຣະຫັດຕະຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ພຣະອະຣະຫັນຜູ້ເປັນອະສະມະຍະວິມຸດຈະເລີນມັກ ຯລຯ ຈະເລີນໂພດຊົງເພື່ອລະໂທສະ ຯລຯ ຈະເລີນອະໂນດຕັບປະແລ້ວບໍ່ເສື່ອມຈາກອະຣະຫັດຕະຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຜູ້ເປັນສະມະຍະວິມຸດຈະເລີນມັກ ຯລຯ ຈະເລີນໂພດຊົງເພື່ອລະອະໂນດຕັບປະແລ້ວບໍ່ເສື່ອມຈາກອະຣະຫັດຕະຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ພຣະອະຣະຫັນຜູ້ເປັນອະສະມະຍະວິມຸດເປັນຜູ້ປາສະຈາກຣາຄະ ໂທສະ ໂມຫະ ຯລຯ ເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງແລ້ວບໍ່ເສື່ອມຈາກອະຣະຫັດຕະຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຜູ້ເປັນສະມະຍະວິມຸດເປັນຜູ້ປາສະຈາກຣາຄະ ໂທສະ ໂມຫະ ຯລຯ ເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງແລ້ວບໍ່ເສື່ອມຈາກອະຣະຫັດຕະຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໖໔] ສກ. ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສາຣີບຸດເຖຣະເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະມະຫາໂມກຄັນລານະເຖຣະ ຯລຯ ພຣະມະຫາກັດສະປະເຖຣະ ຯລຯ ພຣະມະຫາກັດຈາຍະນະເຖຣະ ຯລຯ ພຣະມະຫາໂກດຖິກະເຖຣະ ຯລຯ ພຣະມະຫາປັນຖະກະເຖຣະ ເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ພຣະສາຣີບຸດເຖຣະບໍ່ເສື່ອມຈາກອະຣະຫັດຕະຜົນແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະສາຣີບຸດເຖຣະບໍ່ເສື່ອມຈາກອະຣະຫັດຕະຜົນ ທ່ານກໍບໍ່ຄວນຍອມຮັບວ່າ “ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້”

ສກ. ພຣະມະຫາໂມກຄັນລານະເຖຣະ ຯລຯ ພຣະມະຫາກັດສະປະເຖຣະ ຯລຯ ພຣະມະຫາກັດຈາຍະນະເຖຣະ ຯລຯ ພຣະມະຫາໂກດຖິກະເຖຣະ ຯລຯ ພຣະມະຫາປັນຖະກະເຖຣະ ບໍ່ເສື່ອມຈາກອະຣະຫັດຕະຜົນແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະມະຫາໂມກຄັນລານະເຖຣະ ຯລຯ ພຣະມະຫາປັນຖະກະເຖຣະ ບໍ່ເສື່ອມຈາກອະຣະຫັດຕະຜົນ ທ່ານກໍບໍ່ຄວນຍອມຮັບວ່າ "ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້"

**ອະຣິຍະປຸກຄະລະສັງສັນທະນະປະຣິຫານີ ຈົບ**

## ໖. ສຸດຕະສາທະນະປະຣິຫານີ

## ວ່າດ້ວຍການອ້າງພຣະສູດໃນເລື້ອງຄວາມເສື່ອມ

[໔໖໕] ສກ. ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ປະຕິປະທາທີ່ພຣະສະມະນະປະກາດແລ້ວມີທັງສູງແລະຕໍ່າ
ມຸນີຜູ້ປະຕິບັດຈະໄປເຖິງຝັ່ງເຖິງ ໔ ຄັ້ງຫາບໍ່ໄດ້
ຝັ່ງນີ້ຜູ້ປະຕິບັດຮູ້ໄດ້ຄັ້ງດຽວກໍຫາບໍ່ໄດ້"

ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້"

ສກ. ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ກິເລດວັດທີ່ພຣະອະຣະຫັນຕັດໄດ້ແລ້ວຍັງມີບາງຢ່າງທີ່ຍັງຈະຕ້ອງຕັດອີກ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ກິເລດວັດທີ່ພຣະອະຣະຫັນຕັດໄດ້ແລ້ວ ຍັງມີບາງຢ່າງທີ່ຍັງຈະຕ້ອງຕັດອີກແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ທ່ານເປັນຜູ້ບໍ່ມີຕັນຫາ ບໍ່ມີຄວາມຖືໝັ້ນ
ບໍ່ມີກິດທີ່ຕ້ອງເຮັດ ກິເລດວັດທ່ານຕັດແລ້ວ ບໍ່ມີທີ່ຈະຕ້ອງຕັດອີກ

ຫ້ອງນ້ຳແລະບ່ອງທ່ານຖອນໄດ້ແລ້ວ"

ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ກິເລດວັດທີ່ພຣະອະຣະຫັນຕັດແລ້ວ ຍັງມີບາງຢ່າງທີ່ຍັງຈະຕ້ອງຕັດອີກ"

[໔໖໖] ສກ. ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ກິດທີ່ເຮັດແລ້ວຕ້ອງສັ່ງສົມອີກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ກິດທີ່ເຮັດແລ້ວຕ້ອງສັ່ງສົມອີກແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ພິກຂຸຜູ້ມີຈິດສະງົບລະງັບລຸດພົ້ນໂດຍຊອບ
ຍ່ອມບໍ່ມີການສັ່ງສົມກິດທີ່ເຮັດແລ້ວ ທັງບໍ່ມີກິດທີ່ຈະຕ້ອງເຮັດອີກ
ພູເຂົາຫີນແທ່ງທຶບຍ່ອມບໍ່ສະເທືອນຍ້ອນລົມ ສັນໃດ
ຮູບ ສຽງ ກິ່ນ ຣົດ ໂຜດຖັບພະ ແລະທຳມາຣົມທັງມວນ
ທັງທີ່ເປັນອິດຖາຣົມ ແລະອະນິດຖາຣົມ
ຍ່ອມເຮັດຈິດຂອງຜູ້ຄົງທີ່ໃຫ້ຫວັ່ນໄຫວບໍ່ໄດ້ ສັນນັ້ນ
ຈິດຂອງຜູ້ຄົງທີ່ນັ້ນ ເປັນຈິດຕັ້ງໝັ້ນ ບໍ່ຫວັ່ນໄຫວ
ບໍ່ເກາະກ່ຽວດ້ວຍອາລົມອັນໃດ?
ຍ້ອນທ່ານຜູ້ຄົງທີ່ພິຈາລະນາເຫັນຄວາມເກີດດັບຂອງຈິດນັ້ນ"
ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ກິດທີ່ເຮັດແລ້ວຕ້ອງສັ່ງສົມອີກມີຢູ່"

[໔໖໗] ປຣ. ທ່ານບໍ່ຍອມຮັບວ່າ "ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ທຳ ໕ ປະການນີ້ ຍ່ອມເປັນໄປເພື່ອຄວາມເສື່ອມແກ່ພິກຂຸຜູ້ເປັນສະມະຍະວິມຸດ ທຳ ໕ ປະການ ຄື (໑) ຄວາມເປັນຜູ້ມັກວຽກງານ (໒) ຄວາມເປັນຜູ້ມັກການໂອ້ລົມ (໓) ຄວາມເປັນຜູ້ມັກການນອນຫຼັບ (໔)

ຄວາມເປັນຜູ້ມັກການຄຸກຄີດ້ວຍໝູ່ (໕) ບໍ່ພິຈາລະນາຈິດຕາມທີ່ລຸດພົ້ນແລ້ວ ພິກຂຸທັງຫຼາຍ ທຳ ໕ ປະການນີ້ ຍ່ອມເປັນໄປເພື່ອຄວາມເສື່ອມແກ່ພິກຂຸຜູ້ເປັນສະມະຍະວິມຸດ" ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ "ພຣະອະຣະຫັນຈຶ່ງເສື່ອມຈາກອະຣະຫັດຕະຜົນໄດ້"

ສກ. ຄວາມເປັນຜູ້ມັກວຽກງານຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ຄວາມເປັນຜູ້ມັກວຽກງານຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຣາຄະ ກາມຣາຄະ ກາມຣາຄະປະຣິຍຸດຖານ ກາມຣາຄະສັງໂຍດ ກາໂມຄະ ການ ໂຍຄະ ການສັນທະນິວອນຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ຄວາມເປັນຜູ້ມັກການໂອ້ລົມ ຄວາມເປັນຜູ້ມັກການນອນຫຼັບ ຄວາມເປັນຜູ້ມັກການ ຄຸກຄີດ້ວຍໝູ່ຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມເປັນຜູ້ມັກການຄຸກຄີດ້ວຍໝູ່ຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຣາຄະ ກາມຣາຄະ ກາມຣາຄະປະຣິຍຸດຖານ ກາມຣາຄະສັງໂຍດ ກາໂມຄະ ການ ໂຍຄະ ການສັນທະນິວອນຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

[໔໗໙] ສກ. ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນເມື່ອເສື່ອມຈາກອະຣະຫັດຕະຜົນ ຖືກສິ່ງໃດກຸ້ມຣຸມຈຶ່ງເສື່ອມ

ປຣ. ຖືກຣາຄະກຸ້ມຣຸມຈຶ່ງເສື່ອມ

ສກ. ຄວາມກຸ້ມຣຸມເກີດຂຶ້ນຍ້ອນອາໄສສິ່ງໃດ

ປຣ. ເກີດຂຶ້ນຍ້ອນອາໄສອະນຸໄສ

ສກ. ອະນຸໄສຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ອະນຸໄສຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ກາມຣາຄານຸໄສ ປະຕິຄານຸໄສ ມານານຸໄສ ທິດຖານຸໄສ ວິຈິກິດສານຸໄສ ພະວະ ຣາຄານຸໄສ (ແລະ) ອະວິດຊານຸໄສຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ພຣະອະຣະຫັນເມື່ອເສື່ອມຈາກອະຣະຫັດຕະຜົນ ຖືກສິ່ງໃດກຸ້ມຣຸມຈຶ່ງເສື່ອມ

ປຣ. ຖືກໂທສະກຸ້ມຣຸມຈຶ່ງເສື່ອມ ຯລຯ ຖືກໂມຫະກຸ້ມຣຸມຈຶ່ງເສື່ອມ

ສກ. ຄວາມກຸ້ມຣຸມເກີດຂຶ້ນຍ້ອນອາໄສສິ່ງໃດ

ປຣ. ເກີດຂຶ້ນຍ້ອນອາໄສອະນຸໄສ

ສກ. ອະນຸໄສຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະນຸໄສຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ການຣາຄານຸໄສ ຯລຯ ອະວິດຊານຸໄສຂອງພຣະອະຣະຫັນມີຢູ່ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນ ສິ່ງໃດກໍ່ຕົວຂຶ້ນ

ປຣ. ຣາຄະກໍ່ຕົວຂຶ້ນ

ສກ. ສັກກາຍະທິດຖິກໍ່ຕົວຂຶ້ນ ວິຈິກິດສາກໍ່ຕົວຂຶ້ນສີລັບພະຕະປະຣາມາດກໍ່ຕົວຂຶ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນ ສິ່ງໃດກໍ່ຕົວຂຶ້ນ

ປຣ. ໂທສະກໍ່ຕົວຂຶ້ນ ຯລຯ

ສກ. ເມື່ອພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນ ສິ່ງໃດກໍ່ຕົວຂຶ້ນ

ປຣ. ໂມຫະກໍ່ຕົວຂຶ້ນ

ສກ. ສັກກາຍະທິດຖິກໍ່ຕົວຂຶ້ນ ວິຈິກິດສາກໍ່ຕົວຂຶ້ນສີລັບພະຕະປະຣາມາດກໍ່ຕົວຂຶ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຍັງສະສົມ (ຈຸຕິແລະປະຕິສົນທິ) ຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ພຣະອະຣະຫັນບໍ່ສະສົມແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ພຣະອະຣະຫັນຍັງລະຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ພຣະອະຣະຫັນຍັງຍຶດໝັ້ນຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ພຣະອະຣະຫັນຍັງກຳຈັດຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ພຣະອະຣະຫັນຍັງກໍ່ຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ພຣະອະຣະຫັນຍັງທຳລາຍຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ພຣະອະຣະຫັນຍັງປັບປຸງຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ພຣະອະຣະຫັນຍັງສະສົມຢູ່ກໍບໍ່ແມ່ນ ບໍ່ສະສົມຢູ່ກໍບໍ່ແມ່ນ ເປັນຜູ້ບໍ່ສະສົມແລ້ວຈຶ່ງດຳລົງຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະອະຣະຫັນຍັງສະສົມຢູ່ກໍບໍ່ແມ່ນ ບໍ່ສະສົມຢູ່ກໍບໍ່ແມ່ນ ເປັນຜູ້ບໍ່ສະສົມແລ້ວຈຶ່ງດຳລົງຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້"

ສກ. ພຣະອະຣະຫັນຍັງລະຢູ່ກໍບໍ່ແມ່ນ ຍຶດໝັ້ນຢູ່ກໍບໍ່ແມ່ນ ເປັນຜູ້ລະໄດ້ແລ້ວຈຶ່ງດຳລົງຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະອະຣະຫັນຍັງລະຢູ່ກໍບໍ່ແມ່ນ ຍຶດໝັ້ນຢູ່ກໍບໍ່ແມ່ນ ເປັນຜູ້ລະໄດ້ແລ້ວຈຶ່ງດຳລົງຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້"

ສກ. ພຣະອະຣະຫັນຍັງກຳຈັດຢູ່ກໍບໍ່ແມ່ນ ກໍ່ຢູ່ກໍບໍ່ແມ່ນ ເປັນຜູ້ກຳຈັດແລ້ວຈຶ່ງດຳລົງຢູ່ ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະອະຣະຫັນຍັງກຳຈັດຢູ່ກໍບໍ່ແມ່ນ ກໍ່ຢູ່ກໍບໍ່ແມ່ນ ເປັນຜູ້ກຳຈັດ ຈຶ່ງດຳລົງຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້"

ສກ. ພຣະອະຣະຫັນຍັງທຳລາຍຢູ່ກໍບໍ່ແມ່ນ ປັບປຸງຢູ່ກໍບໍ່ແມ່ນ ເປັນຜູ້ທຳລາຍແລ້ວຈຶ່ງດຳລົງຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະອະຣະຫັນຍັງທຳລາຍຢູ່ກໍບໍ່ແມ່ນ ປັບປຸງຢູ່ກໍບໍ່ແມ່ນ ເປັນຜູ້ທຳລາຍແລ້ວຈຶ່ງດຳລົງຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນໄດ້"

**ປະຣິຫານີກະຖາ ຈົບ**

# ໓. (ກ) ພິມມະຈະຣິຍະກະຖາ

## ວ່າດ້ວຍພົມມະຈັນ

## ໑. ສຸດທະພົມຈະຣິຍະກະຖາ

## ວ່າດ້ວຍພົມມະຈັນລ້ວນ ໆ

[໔໗໙] ສກ. ໃນໝູ່ເທວະດາ ບໍ່ມີການຢູ່ປະພຶດພົມມະຈັນ ແມ່ນບໍ?

ປຣ.໔ ແມ່ນ

ສກ. ເທວະດາທັງຫຼາຍເປັນຜູ້ໂງ່ຈ້າ ເບົາປັນຍາ ບໍ່ຮູ້ດຽງສາ ໃຊ້ພາສາກືກ ບໍ່ສາມາດຈະຮູ້ຄວາມໝາຍຂອງຄໍາທີ່ກ່າວດີຫຼືຊົ່ວໄດ້ ບໍ່ເຫຼື້ອມໃສໃນພຣະພຸດທະເຈົ້າ ພຣະທໍາ ພຣະສົງ ບໍ່ເຂົ້າໄປນັ່ງໃກ້ພຣະຜູ້ມີພຣະພາກພຸດທະເຈົ້າ ບໍ່ທູນຖາມບັນຫາກັບພະອົງ ເມື່ອພະອົງຊົງວິສັດຊະນາບັນຫາກໍບໍ່ຊື່ນຊົມ ເປັນຜູ້ປະກອບດ້ວຍເຄື່ອງກັ້ນຄືກໍາ ເຄື່ອງກັ້ນຄືກິເລດ ເຄື່ອງກັ້ນຄືວິບາກ ບໍ່ມີສັດທາ ບໍ່ມີສັນທະ ມີປັນຍາຊາມ ບໍ່ຄວນທີ່ຈະກ້າວລົງສູ່ນິຍາມອັນຖືກຕ້ອງໃນກຸສົນທໍາທັງຫຼາຍ ເປັນຜູ້ຂ້າມານດາ ຂ້າບິດາ ຂ້າພຣະອະຣະຫັນ ທໍາຮ້າຍ  ພຣະພຸດທະເຈົ້າຈົນເຖິງພຣະໂລຫິດຫໍ້ ທໍາລາຍສົງໃຫ້ແຕກກັນ ເປັນຜູ້ຂ້າສັດ ລັກຊັບ ປະພຶດຜິດໃນກາມ ເວົ້າຕົວະ ເວົ້າສັບສໍ່ ເວົ້າຄໍາຫຍາບ ເວົ້າໂລເລ ຫຼາຍໄປດ້ວຍອະພິດຊາ ມີຈິດຄິດພະຍາບາດ ເປັນມິດສາທິດຖິແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເທວະດາທັງຫຼາຍເປັນຜູ້ບໍ່ໂງ່ຈ້າ ມີປັນຍາ ຮູ້ດຽງສາ ບໍ່ໃຊ້ພາສາກືກ ສາມາດຮູ້ຄວາມໝາຍຂອງຄໍາທີ່ກ່າວດີຫຼືຊົ່ວໄດ້ ເຫຼື້ອມໃສໃນພຣະພຸດທະເຈົ້າ ພຣະທໍາ ພຣະສົງ ເຂົ້າໄປນັ່ງໃກ້ພຣະຜູ້ມີພຣະພາກພຸດທະເຈົ້າ ທູນຖາມບັນຫາກັບພະອົງ ເມື່ອພະອົງຊົງວິສັດຊະນາບັນຫາ ກໍເປັນຜູ້ຊື່ນຊົມ ເປັນຜູ້ບໍ່ປະກອບດ້ວຍເຄື່ອງກັ້ນຄືກໍາ ເຄື່ອງກັ້ນຄືກິເລດ ເຄື່ອງກັ້ນຄືວິບາກ ເປັນຜູ້ມີສັດທາ ມີສັນທະ ມີປັນຍາ ຄວນທີ່ຈະກ້າວລົງສູ່ນິຍາມອັນຖືກຕ້ອງໃນກຸສົນທໍາທັງຫຼາຍ ບໍ່ເປັນຜູ້ຂ້າມານດາ ຂ້າບິດາ ຂ້າພຣະອະຣະຫັນ ບໍ່ທໍາຮ້າຍພຣະພຸດທະເຈົ້າຈົນເຖິງພຣະໂລຫິດຫໍ້ ບໍ່ທໍາລາຍສົງໃຫ້ແຕກກັນ ບໍ່ຂ້າສັດ ບໍ່ລັກຊັບ ບໍ່ປະພຶດຜິດໃນກາມ ບໍ່ເວົ້າຕົວະ ບໍ່ເວົ້າສັບສໍ່ ບໍ່ເວົ້າຄໍາຫຍາບ ບໍ່ເວົ້າໂລເລ ບໍ່ເປັນຜູ້ຫຼາຍໄປດ້ວຍອະພິດຊາ ບໍ່ມີຈິດຄິດພະຍາບາດ ເປັນສໍາມາທິດຖິ ມີຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກເທວະດາທັງຫຼາຍເປັນຜູ້ບໍ່ໂງ່ຈ້າ ມີປັນຍາ ຮູ້ດຽງສາ ບໍ່ໃຊ້ພາສາກືກ ສາມາດຮູ້ຄວາມໝາຍຂອງຄໍາທີ່ກ່າວດີຫຼືຊົ່ວໄດ້ ຯລຯ ເຫຼື້ອມໃສໃນພຣະພຸດທະເຈົ້າ ຯລຯ ເປັນສໍາມາທິດຖິ ມີຢູ່ ທ່ານກໍບໍ່ຄວນຍອມຮັບວ່າ “ໃນໝູ່ເທວະດາບໍ່ມີການຢູ່ປະພຶດພົມມະຈັນ”

[໔໗໐] ປຣ. ໃນໝູ່ເທວະດາ ມີການຢູ່ປະພຶດພົມມະຈັນແມ່ນບໍ?

ສກ. ແມ່ນ

ປຣ. ໃນໝູ່ເທວະດານັ້ນມີການບັນພະຊາ ການແຖຜົມ ການຄອງຜ້າກາສາວະພັດ ການຊົງບາດ ພຣະສຳມາສຳພຸດທະເຈົ້າທັງຫຼາຍຊົງອຸບັດໄດ້ ພຣະປັດເຈກສຳພຸດທະເຈົ້າທັງຫຼາຍອຸບັດໄດ້ ຄູ່ພຣະອັກຄະຣະສາວົກກໍອຸບັດໄດ້ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນໝູ່ເທວະດາບໍ່ມີການຢູ່ປະພຶດພົມມະຈັນ ຍ້ອນເຫດນັ້ນ ໃນໝູ່ເທວະດາ ຈຶ່ງບໍ່ມີການຢູ່ປະພຶດພົມມະຈັນແມ່ນບໍ?

ປຣ. ແມ່ນ

ສກ. ໃນບ່ອນທີ່ມີການບັນພະຊາເທົ່ານັ້ນ ຈຶ່ງມີການຢູ່ປະພຶດພົມມະຈັນ ໃນບ່ອນທີ່ບໍ່ມີການບັນພະຊາ ບໍ່ມີການຢູ່ປະພຶດພົມມະຈັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນບ່ອນທີ່ມີການບັນພະຊາເທົ່ານັ້ນ ຈຶ່ງມີການຢູ່ປະພຶດພົມມະຈັນ ໃນບ່ອນທີ່ບໍ່ມີການບັນພະຊາ ບໍ່ມີການຢູ່ປະພຶດພົມມະຈັນແມ່ນບໍ?

ປຣ. ແມ່ນ

ສກ. ຜູ້ທີ່ບັນພະຊາເທົ່ານັ້ນ ຈຶ່ງມີການຢູ່ປະພຶດພົມມະຈັນ ຜູ້ທີ່ບໍ່ໄດ້ບັນພະຊາບໍ່ມີການຢູ່ປະພຶດພົມມະຈັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນໝູ່ເທວະດາບໍ່ມີການແຖຜົມ ຍ້ອນເຫດນັ້ນ ໃນໝູ່ເທວະດາຈຶ່ງບໍ່ມີການຢູ່ປະພຶດພົມມະຈັນແມ່ນບໍ?

ປຣ. ແມ່ນ

ສກ. ໃນບ່ອນທີ່ມີການແຖຜົມເທົ່ານັ້ນ ຈຶ່ງມີການຢູ່ປະພຶດພົມມະຈັນ ໃນບ່ອນທີ່ບໍ່ມີການແຖຜົມ ບໍ່ມີການຢູ່ປະພຶດພົມມະຈັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນບ່ອນທີ່ມີການແຖຜົມເທົ່ານັ້ນ ຈຶ່ງມີການຢູ່ປະພຶດພົມມະຈັນ ໃນບ່ອນທີ່ບໍ່ມີການແຖຜົມ ບໍ່ມີການຢູ່ປະພຶດພົມມະຈັນແມ່ນບໍ?

ປຣ. ແມ່ນ

ສກ. ສະເພາະຜູ້ທີ່ແຖຜົມເທົ່ານັ້ນ ຈຶ່ງມີການຢູ່ປະພຶດພົມມະຈັນ ຜູ້ທີ່ບໍ່ແຖຜົມ ບໍ່ມີການຢູ່ປະພຶດພົມມະຈັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນໝູ່ເທວະດາບໍ່ມີການຄອງຜ້າກາສາວະພັດ ຍ້ອນເຫດນັ້ນ ໃນໝູ່ເທວະດາຈຶ່ງບໍ່ມີການຢູ່ປະພຶດພົມມະຈັນແມ່ນບໍ?

ປຣ. ແມ່ນ

ສກ. ໃນບ່ອນທີ່ມີການຄອງຜ້າກາສາວະພັດເທົ່ານັ້ນ ຈຶ່ງມີການຢູ່ປະພຶດພົມມະຈັນ ໃນບ່ອນທີ່ບໍ່ມີການຄອງຜ້າກາສາວະພັດ ບໍ່ມີການຢູ່ປະພຶດພົມມະຈັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນບ່ອນທີ່ມີການຄອງຜ້າກາສາວະພັດເທົ່ານັ້ນ ຈຶ່ງມີການຢູ່ປະພຶດພົມມະຈັນ ໃນບ່ອນທີ່ບໍ່ມີການຄອງຜ້າກາສາວະພັດ ບໍ່ມີການຢູ່ປະພຶດພົມມະຈັນແມ່ນບໍ?

ປຣ. ແມ່ນ

ສກ. ຜູ້ທີ່ຄອງຜ້າກາສາວະພັດເທົ່ານັ້ນ ຈຶ່ງມີການຢູ່ປະພຶດພົມມະຈັນ ຜູ້ທີ່ບໍ່ຄອງຜ້າກາສາວະພັດ ບໍ່ມີການຢູ່ປະພຶດພົມມະຈັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນໝູ່ເທວະດາບໍ່ມີການຊົງບາດ ຍ້ອນເຫດນັ້ນ ໃນໝູ່ເທວະດາຈຶ່ງບໍ່ມີການຢູ່ປະພຶດພົມມະຈັນແມ່ນບໍ?

ປຣ. ແມ່ນ

ສກ. ໃນບ່ອນທີ່ມີການຊົງບາດເທົ່ານັ້ນ ຈຶ່ງມີການຢູ່ປະພຶດພົມມະຈັນ ໃນບ່ອນທີ່ບໍ່ມີການຊົງບາດ ບໍ່ມີການຢູ່ປະພຶດພົມມະຈັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນບ່ອນທີ່ມີການຊົງບາດເທົ່ານັ້ນ ຈຶ່ງມີການຢູ່ປະພຶດພົມມະຈັນ ໃນບ່ອນທີ່ບໍ່ມີການຊົງບາດ ບໍ່ມີການຢູ່ປະພຶດພົມມະຈັນແມ່ນບໍ?

ປຣ. ແມ່ນ

ສກ. ຜູ້ທີ່ຊົງບາດເທົ່ານັ້ນ ຈຶ່ງມີການຢູ່ປະພຶດພົມມະຈັນ ຜູ້ທີ່ບໍ່ຊົງບາດ ບໍ່ມີການຢູ່ປະພຶດພົມມະຈັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະສຳມາສຳພຸດທະເຈົ້າທັງຫຼາຍບໍ່ຊົງອຸບັດໃນໝູ່ເທວະດາ ຍ້ອນເຫດນັ້ນ ໃນໝູ່ເທວະດາຈຶ່ງບໍ່ມີການຢູ່ປະພຶດພົມມະຈັນແມ່ນບໍ?

ປຣ. ແມ່ນ

ສກ. ໃນບ່ອນທີ່ພຣະສຳມາສຳພຸດທະເຈົ້າທັງຫຼາຍຊົງອຸບັດເທົ່ານັ້ນ ຈຶ່ງມີການຢູ່ປະພຶດພົມມະຈັນ ໃນບ່ອນທີ່ພຣະສຳມາສຳພຸດທະເຈົ້າທັງຫຼາຍບໍ່ຊົງອຸບັດ ບໍ່ມີການຢູ່ປະພຶດພົມມະຈັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນບ່ອນທີ່ພຣະສຳມາສຳພຸດທະເຈົ້າທັງຫຼາຍຊົງອຸບັດເທົ່ານັ້ນ ຈຶ່ງມີການຢູ່ປະພຶດພົມມະຈັນ ໃນບ່ອນທີ່ພຣະສຳມາສຳພຸດທະເຈົ້າທັງຫຼາຍບໍ່ຊົງອຸບັດ ບໍ່ມີການຢູ່ປະພຶດພົມມະຈັນແມ່ນບໍ?

ປຣ. ແມ່ນ

ສກ. ພຣະຜູ້ມີພຣະພາກເຈົ້າປະສູດທີ່ສວນລຸມພິນີ ຕັດສະຣູ້ຢູ່ຕົ້ນໂພ ຊົງປະກາດ ທຳມະຈັກທີ່ນະຄອນພາຣານະສີ ໃນບ່ອນນັ້ນເທົ່ານັ້ນ ຈຶ່ງມີການຢູ່ປະພຶດພົມມະຈັນ ໃນທີ່ອື່ນບໍ່ມີການຢູ່ປະພຶດພົມມະຈັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະປັດເຈກພຸດທະເຈົ້າທັງຫຼາຍບໍ່ອຸບັດໃນໝູ່ເທວະດາ ຍ້ອນເຫດນັ້ນ ໃນໝູ່ເທວະດາຈຶ່ງບໍ່ມີການຢູ່ປະພຶດພົມມະຈັນແມ່ນບໍ?

ປຣ. ແມ່ນ

ສກ. ໃນບ່ອນທີ່ພຣະປັດເຈກສຳພຸດທະເຈົ້າທັງຫຼາຍອຸບັດເທົ່ານັ້ນ ຈຶ່ງມີການຢູ່ປະພຶດພົມມະຈັນ ໃນບ່ອນທີ່ພຣະປັດເຈກສຳພຸດທະເຈົ້າທັງຫຼາຍບໍ່ອຸບັດ ບໍ່ມີການຢູ່ປະພຶດພົມມະຈັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນບ່ອນທີ່ພຣະປັດເຈກສຳພຸດທະເຈົ້າທັງຫຼາຍອຸບັດເທົ່ານັ້ນ ຈຶ່ງມີການຢູ່ປະພຶດພົມມະຈັນ ໃນບ່ອນທີ່ພຣະປັດເຈກສຳພຸດທະເຈົ້າທັງຫຼາຍບໍ່ອຸບັດ ບໍ່ມີການຢູ່ປະພຶດພົມມະຈັນແມ່ນບໍ?

ປຣ. ແມ່ນ

ສກ. ພຣະປັດເຈກສຳພຸດທະເຈົ້າທັງຫຼາຍອຸບັດໃນມັດຊິມະຊົນນະບົດ ໃນມັດຊິມະຊົນນະບົດນັ້ນເທົ່ານັ້ນ ຈຶ່ງມີການຢູ່ປະພຶດພົມມະຈັນ ໃນບ່ອນອື່ນບໍ່ມີການຢູ່ປະພຶດພົມມະຈັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄູ່ພຣະອັກຄະຣະສາວົກບໍ່ອຸບັດໃນໝູ່ເທວະດາ ຍ້ອນເຫດນັ້ນ ໃນໝູ່ເທວະດາຈຶ່ງບໍ່ມີການຢູ່ປະພຶດພົມມະຈັນແມ່ນບໍ?

ປຣ. ແມ່ນ

ສກ. ໃນບ່ອນທີ່ຄູ່ພຣະອັກຄະຣະສາວົກອຸບັດເທົ່ານັ້ນ ຈຶ່ງມີການຢູ່ປະພຶດພົມມະຈັນ ໃນບ່ອນທີ່ຄູ່ພຣະອັກຄະຣະສາວົກບໍ່ອຸບັດ ບໍ່ມີການຢູ່ປະພຶດພົມມະຈັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນບ່ອນທີ່ຄູ່ພຣະອັກຄະຣະສາວົກອຸບັດເທົ່ານັ້ນ ຈຶ່ງມີການຢູ່ປະພຶດພົມມະຈັນ ໃນບ່ອນທີ່ຄູ່ພຣະອັກຄະຣະສາວົກບໍ່ອຸບັດ ບໍ່ມີການຢູ່ປະພຶດພົມມະຈັນແມ່ນບໍ?

ປຣ. ແມ່ນ

ສກ. ໃນມະຄົດຣັດເຊິ່ງເປັນບ່ອນອຸບັດຂອງຄູ່ພຣະອັກຄະຣະສາວົກເທົ່ານັ້ນ ຈຶ່ງມີການຢູ່ປະພຶດພົມມະຈັນ ໃນບ່ອນອື່ນບໍ່ມີການຢູ່ປະພຶດພົມມະຈັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໗໑] ປຣ. ໃນໝູ່ເທວະດາມີການຢູ່ປະພຶດພົມມະຈັນແມ່ນບໍ?

ສກ. ແມ່ນ

ປຣ. ໃນໝູ່ເທວະດາທັງປວງມີການຢູ່ປະພຶດພົມມະຈັນແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນໝູ່ມະນຸດມີການຢູ່ປະພຶດພົມມະຈັນແມ່ນບໍ?

ປຣ. ແມ່ນ

ສກ. ໃນໝູ່ມະນຸດທັງປວງມີການຢູ່ປະພຶດພົມມະຈັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ໃນໝູ່ເທວະດາມີການຢູ່ປະພຶດພົມມະຈັນແມ່ນບໍ?

ສກ. ແມ່ນ

ປຣ. ໃນໝູ່ອະສັນຍະສັດຕະພົມມີການຢູ່ປະພຶດພົມມະຈັນແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນໝູ່ມະນຸດມີການຢູ່ປະພຶດພົມມະຈັນແມ່ນບໍ?

ປຣ. ແມ່ນ

ສກ. ໃນຊາວປັດຈັນຕະຊົນນະບົດທີ່ພວກພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາໄປບໍ່ເຖິງ ແລະໃນພວກມິລັກຂະຜູ້ບໍ່ຮູ້ດຽງສາ ມີການຢູ່ປະພຶດພົມມະຈັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ໃນໝູ່ເທວະດາມີການຢູ່ປະພຶດພົມມະຈັນແມ່ນບໍ?

ສກ. ທີ່ມີກໍມີ ທີ່ບໍ່ມີກໍມີ

ປຣ. ໃນໝູ່ອະສັນຍະສັດຕະພົມທີ່ມີການຢູ່ປະພຶດພົມມະຈັນກໍມີ ທີ່ບໍ່ມີການຢູ່ປະພຶດພົມມະຈັນກໍມີ ແລະໃນໝູ່ສັນຍະສັດຕະພົມທີ່ມີການຢູ່ປະພຶດພົມມະຈັນກໍມີ ທີ່ບໍ່ມີການຢູ່ປະພຶດພົມມະຈັນກໍມີແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ໃນໝູ່ເທວະດາທີ່ມີການຢູ່ປະພຶດພົມມະຈັນກໍມີ ທີ່ບໍ່ມີການຢູ່ປະພຶດພົມມະຈັນກໍມີແມ່ນບໍ?

ສກ. ແມ່ນ

ປຣ. ຢູ່ໃສມີ ຢູ່ໃສບໍ່ມີ

ສກ. ໃນໝູ່ອະສັນຍະສັດຕະພົມບໍ່ມີການຢູ່ປະພຶດພົມມະຈັນ ແຕ່ໃນໝູ່ສັນຍະສັດຕະພົມມີການຢູ່ປະພຶດພົມມະຈັນ

ປຣ. ໃນໝູ່ອະສັນຍະສັດຕະພົມບໍ່ມີການຢູ່ປະພຶດພົມມະຈັນແມ່ນບໍ?

ສກ. ແມ່ນ

ປຣ. ໃນໝູ່ສັນຍະສັດຕະພົມບໍ່ມີການຢູ່ປະພຶດພົມມະຈັນແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ໃນໝູ່ສັນຍະສັດຕະພົມມີການຢູ່ປະພຶດພົມມະຈັນແມ່ນບໍ?

ສກ. ແມ່ນ

ປຣ. ໃນໝູ່ອະສັນຍະສັດຕະພົມມີການຢູ່ປະພຶດພົມມະຈັນແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນໝູ່ມະນຸດມີການຢູ່ປະພຶດພົມມະຈັນແມ່ນບໍ?

ປຣ. ທີ່ມີກໍມີ ທີ່ບໍ່ມີກໍມີ

ສກ. ໃນຊາວປັດຈັນຕະຊົນນະບົດທີ່ພວກພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາໄປບໍ່ເຖິງ ແລະໃນພວກມິລັກຂະຜູ້ບໍ່ຮູ້ດຽງສາ ມີການຢູ່ປະພຶດພົມມະຈັນກໍມີ ບໍ່ມີກໍມີ ໃນຊາວມັດຊິມະຊົນນະບົດມີການຢູ່ປະພຶດພົມມະຈັນກໍມີ ບໍ່ມີກໍມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນໝູ່ມະນຸດມີການຢູ່ປະພຶດພົມມະຈັນກໍມີ ບໍ່ມີກໍມີແມ່ນບໍ?

ປຣ. ແມ່ນ

ສກ. ຢູ່ໃສມີ ຢູ່ໃສບໍ່ມີ

ປຣ. ໃນຊາວປັດຈັນຕະຊົນນະບົດທີ່ພວກພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາໄປບໍ່ເຖິງ ແລະໃນພວກມິລັກຂະຜູ້ບໍ່ຮູ້ດຽງສາ ບໍ່ມີການຢູ່ປະພຶດພົມມະຈັນ ໃນຊາວມັດຊິມະຊົນນະບົດມີການຢູ່ປະພຶດພົມມະຈັນ

ສກ. ໃນຊາວປັດຈັນຕະຊົນນະບົດທີ່ພວກພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາໄປບໍ່ເຖິງ ແລະໃນພວກມິລັກຂະຜູ້ບໍ່ຮູ້ດຽງສາ ບໍ່ມີການຢູ່ປະພຶດພົມມະຈັນແມ່ນບໍ?

ປຣ. ແມ່ນ

ສກ. ໃນຊາວມັດຊິມະຊົນນະບົດບໍ່ມີການຢູ່ປະພຶດພົມມະຈັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ໃນຊາວມັດຊິມະຊົນນະບົດມີການຢູ່ປະພຶດພົມມະຈັນແມ່ນບໍ?

ປຣ. ແມ່ນ

ສກ. ໃນຊາວປັດຈັນຕະຊົນນະບົດທີ່ພວກພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາໄປບໍ່ເຖິງ ແລະໃນພວກມິລັກຂະຜູ້ບໍ່ຮູ້ດຽງສາ ມີການຢູ່ປະພຶດພົມມະຈັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ໃນໝູ່ເທວະດາມີການຢູ່ປະພຶດພົມມະຈັນແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ມະນຸດຊາວຊົມພູທະວີບ ເໜືອກວ່າມະນຸດຊາວອຸດຕະຣະກຸຣຸທະວີບ ແລະເທວະດາຊັ້ນຕາວະຕຶງສາ ດ້ວຍຖານະ ໓ ປະການ ຄື (໑) ເປັນຜູ້ແກ່ກ້າ (໒) ເປັນຜູ້ມີສະຕິ (໓) ເປັນຜູ້ຢູ່ປະພຶດພົມມະຈັນໃນຊົມພູທະວີບນີ້" ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ໃນໝູ່ເທວະດາຈຶ່ງບໍ່ມີການຢູ່ປະພຶດພົມມະຈັນ

ສກ. ພຣະຜູ້ມີພຣະພາກເຈົ້າຕັດທີ່ນະຄອນສາວັດຖີວ່າ ໃນບ່ອນນີ້ ມີການຢູ່ປະພຶດພົມມະຈັນແມ່ນບໍ?

ປຣ. ແມ່ນ

ສກ. ການຢູ່ປະພຶດພົມມະຈັນ ມີແຕ່ໃນນະຄອນສາວັດຖີເທົ່ານັ້ນ ໃນບ່ອນອື່ນບໍ່ມີ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

[໒໗໒] ສກ. ອະນາກາມີບຸກຄົນລະສັງໂຍດເບື້ອງຕ່ຳ ໕ ປະການໄດ້ແລ້ວ ແຕ່ຍັງລະສັງໂຍດເບື້ອງສູງ ໕ ປະການບໍ່ໄດ້ ເມື່ອຈຸຕິຈາກໂລກນີ້ແລ້ວໄປປະຕິສົນທິໃນຊັ້ນສຸດທາວາດນັ້ນ ອະຣະຫັດຕະຜົນເກີດຂຶ້ນໄດ້ໃນບ່ອນໃດ?

ປຣ. ໃນຊັ້ນສຸດທາວາດນັ້ນນັ້ນເອງ

ສກ. ຫາກອະນາຄາມີບຸກຄົນລະສັງໂຍດເບື້ອງຕ່ຳ ໕ ປະການໄດ້ແລ້ວ ແຕ່ຍັງລະສັງໂຍດເບື້ອງສູງ ໕ ປະການບໍ່ໄດ້ ເມື່ອຈຸຕິຈາກໂລກນີ້ແລ້ວໄປປະຕິສົນທິໃນຊັ້ນສຸດທາວາດນັ້ນ ອະຣະຫັດຕະຜົນເກີດຂຶ້ນໄດ້ໃນບ່ອນນັ້ນ ທ່ານກໍບໍ່ຄວນຍອມຮັບວ່າ "ໃນໝູ່ເທວະດາບໍ່ມີການ ຢູ່ປະພຶດພົມມະຈັນ"

ສກ. ອະນາຄາມີບຸກຄົນລະສັງໂຍດເບື້ອງຕ່ຳ ໕ ປະການໄດ້ແລ້ວ ແຕ່ຍັງລະສັງໂຍດເບື້ອງສູງ ໕ ປະການບໍ່ໄດ້ ເມື່ອຈຸຕິຈາກໂລກນີ້ແລ້ວໄປປະຕິສົນທິໃນຊັ້ນສຸດທາວາດນັ້ນ ການປົງພາລະ ການກຳນົດຮູ້ທຸກ ການລະກິເລດ ການເຮັດໃຫ້ແຈ້ງນິໂຣດ ການແທງຕະຫຼອດອະກຸບປະທຳມີ ໃນບ່ອນໃດ?

ປຣ. ໃນຊັ້ນສຸດທາວາດນັ້ນນັ້ນເອງ

ສກ. ຫາກອະນາຄາມີບຸກຄົນລະສັງໂຍດເບື້ອງຕ່ຳ ໕ ປະການໄດ້ແລ້ວ ແຕ່ຍັງລະສັງໂຍດເບື້ອງສູງ ໕ ປະການບໍ່ໄດ້ ເມື່ອຈຸຕິຈາກໂລກນີ້ແລ້ວໄປປະຕິສົນທິໃນຊັ້ນສຸດທາວາດນັ້ນ

ການແທງຕະຫຼອດອະກຸບປະທຳມີໃນບ່ອນນັ້ນ ທ່ານກໍບໍ່ຄວນຍອມຮັບວ່າ "ໃນໝູ່ເທວະດາບໍ່ມີການຢູ່ປະພຶດພົມມະຈັນ"

ສກ. ອະນາຄາມີບຸກຄົນລະສັງໂຍດເບື້ອງຕ່ຳ ໕ ປະການໄດ້ແລ້ວ ແຕ່ຍັງລະສັງໂຍດເບື້ອງສູງ ໕ ປະການບໍ່ໄດ້ ເມື່ອຈຸຕິຈາກໂລກນີ້ແລ້ວໄປປະຕິສົນທິໃນຊັ້ນສຸດທາວາດນັ້ນ ການເກີດຂຶ້ນແຫ່ງອະຣະຫັດຕະຜົນ ການປົງພາລະ ການກຳນົດຮູ້ທຸກ ການລະກິເລດ ການເຮັດໃຫ້ແຈ້ງນິໂຣດ ການແທງຕະຫຼອດອະກຸບປະທຳກໍມີໃນບ່ອນນັ້ນ ຍ້ອນເຫດໃດ ທ່ານຈຶ່ງຍອມຮັບວ່າ "ໃນໝູ່ເທວະດາບໍ່ມີການຢູ່ປະພຶດພົມມະຈັນ"

ປຣ. ຍ້ອນວ່າ ອະນາຄາມີບຸກຄົນເຮັດໃຫ້ແຈ້ງຜົນໄດ້ໃນຊັ້ນສຸດທາວາດນັ້ນດ້ວຍມັກທີ່ຕົນໄດ້ຈະເລີນແລ້ວໃນໂລກນີ້

**ສຸດທະພົມຈະຣິຍະກະຖາ ຈົບ**

## ໔. ສັງສັນທະນະພົມຈະຣິຍະກະຖາ

## ວ່າດ້ວຍການທຽບຄຽງພຣະອະຣິຍະບຸກຄົນໃນເລື້ອງພົມມະຈັນ

[໔໗໑] ສກ. ອະນາຄາມີບຸກຄົນເຮັດໃຫ້ແຈ້ງຜົນໃນຊັ້ນສຸດທາວາດນັ້ນດ້ວຍມັກທີ່ຕົນຈະເລີນແລ້ວໃນໂລກນີ້ແມ່ນບໍ?

ປຣ. ແມ່ນ

ສກ. ໂສດາບັນບຸກຄົນເຮັດໃຫ້ແຈ້ງຜົນໃນໂລກນີ້ດ້ວຍມັກທີ່ຕົນຈະເລີນແລ້ວໃນພົມມະໂລກ ນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ອະນາຄາມີບຸກຄົນເຮັດໃຫ້ແຈ້ງຜົນໃນຊັ້ນສຸດທາວາດນັ້ນ ດ້ວຍມັກທີ່ຕົນຈະເລີນແລ້ວໃນໂລກນີ້ແມ່ນບໍ?

ປຣ. ແມ່ນ

ສກ. ສະກະທາຄາມີບຸກຄົນຜູ້ທີ່ຈະປະຣິນິບພານໃນໂລກນີ້ ເຮັດໃຫ້ແຈ້ງຜົນໃນໂລກນີ້ດ້ວຍມັກທີ່ຕົນຈະເລີນແລ້ວໃນຊັ້ນສຸດທາວາດນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ໂສດາບັນບຸກຄົນເຮັດໃຫ້ແຈ້ງຜົນໃນໂລກນີ້ໄດ້ດ້ວຍມັກທີ່ຕົນໄດ້ຈະເລີນແລ້ວໃນໂລກ ນີ້ແມ່ນບໍ?

ປຣ. ແມ່ນ

ສກ. ອະນາຄາມີບຸກຄົນເຮັດໃຫ້ແຈ້ງຜົນໃນຊັ້ນສຸດທາວາດນັ້ນດ້ວຍມັກທີ່ຕົນຈະເລີນແລ້ວໃນຊັ້ນສຸດທາວາດນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ສະກະທາຄາມີບຸກຄົນຜູ້ທີ່ຈະປະຣິນິບພານໃນໂລກນີ້ ເຮັດໃຫ້ແຈ້ງຜົນໃນໂລກນີ້ ດ້ວຍມັກທີ່ຕົນຈະເລີນແລ້ວໃນໂລກນີ້ແມ່ນບໍ?

ປຣ. ແມ່ນ

ສກ. ອະນາຄາມີບຸກຄົນເຮັດໃຫ້ແຈ້ງຜົນໃນຊັ້ນສຸດທາວາດນັ້ນ ດ້ວຍມັກທີ່ຕົນຈະເລີນແລ້ວໃນຊັ້ນສຸດທາວາດນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ລະໂລກນີ້ແລ້ວຈຶ່ງສຳເລັດ ຈະເລີນມັກແຕ່ບໍ່ແມ່ນລະກິເລດແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ ຈະເລີນມັກແຕ່ບໍ່ແມ່ນລະກິເລດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ລະໂລກນີ້ແລ້ວຈຶ່ງສຳເລັດ ຈະເລີນມັກແຕ່ບໍ່ແມ່ນລະກິເລດແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມິຜົນ ຯລຯ ເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ຈະເລີນມັກແຕ່ບໍ່ແມ່ນລະກິເລດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ ຈະເລີນມັກແລະລະກິເລດໄດ້ບໍ່ກ່ອນບໍ່ຫຼັງກັນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ລະໂລກນີ້ແລ້ວຈຶ່ງສຳເລັດ ຈະເລີນມັກແລະລະກິເລດໄດ້ບໍ່ກ່ອນບໍ່ຫຼັງກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມິຜົນ ຯລຯ ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ຈະເລີນມັກແລະລະກິເລດໄດ້ບໍ່ກ່ອນບໍ່ຫຼັງກັນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ລະໂລກນີ້ແລ້ວຈຶ່ງສຳເລັດ ຈະເລີນມັກແລະລະກິເລດໄດ້ບໍ່ກ່ອນບໍ່ຫຼັງກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ອະນາຄາມີບຸກຄົນເຮັດກິດທີ່ຄວນເຮັດແລ້ວ ຈະເລີນພາວະນາແລ້ວຈຶ່ງເກີດໃນຊັ້ນສຸດທາວາດນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຍັງເກີດຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ພຣະອະຣະຫັນຍັງເກີດຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນມີການເກີດອີກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ພຣະອະຣະຫັນມີການເກີດອີກແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນອອກຈາກພົບໄປສູ່ພົບ ຈາກຄະຕິໄປສູ່ຄະຕິ ຈາກສົງສານໄປສູ່ສົງສານ ຈາກການເກີດໄປສູ່ການເກີດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ອະນາຄາມີບຸກຄົນເຮັດກິດທີ່ຄວນເຮັດແລ້ວ ຈະເລີນພາວະນາແລ້ວຍັງບໍ່ປົງພາລະເກີດໃນຊັ້ນສຸດທາວາດນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ທ່ານຍັງຈະເລີນມັກອີກເພື່ອປົງພາລະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ອະນາຄາມີບຸກຄົນເຮັດກິດທີ່ຄວນເຮັດແລ້ວ ຈະເລີນພາວະນາແລ້ວ ແຕ່ຍັງບໍ່ກຳນົດຮູ້ທຸກ ຍັງລະກິເລດບໍ່ໄດ້ ຍັງບໍ່ເຮັດໃຫ້ແຈ້ງນິໂຣດ ຍັງບໍ່ແທງຕະຫຼອດອະກຸບປະທຳ ໄປເກີດໃນ ຊັ້ນສຸດທາວາດນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ທ່ານຍັງຈະເລີນມັກອີກເພື່ອແທງຕະຫຼອດອະກຸບປະທຳແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ອະນາຄາມີບຸກຄົນເຮັດກິດທີ່ຄວນເຮັດແລ້ວ ຈະເລີນພາວະນາແລ້ວ ແຕ່ຍັງບໍ່ປົງພາລະ ໄປເກີດໃນຊັ້ນສຸດທາວາດນັ້ນ ແລະຈະບໍ່ຈະເລີນມັກອີກເພື່ອປົງພາລະແມ່ນບໍ?

ປຣ. ແມ່ນ

ສກ. ອັນໜຶ່ງ ທ່ານຍັງບໍ່ປົງພາລະ ປະຣິນິບພານໃນຊັ້ນສຸດທາວາດນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ອະນາຄາມີບຸກຄົນເຮັດກິດທີ່ຄວນເຮັດແລ້ວ ຈະເລີນພາວະນາແລ້ວ ແຕ່ຍັງບໍ່ກຳນົດຮູ້ທຸກ ຍັງລະກິເລດບໍ່ໄດ້ ຍັງບໍ່ເຮັດໃຫ້ແຈ້ງນິໂຣດ ຍັງບໍ່ແທງຕະຫຼອດອະກຸບປະທຳ ໄປເກີດ ໃນຊັ້ນສຸດທາວາດນັ້ນ ແລະບໍ່ຈະເລີນມັກອີກເພື່ອແທງຕະຫຼອດອະກຸບປະທຳແມ່ນບໍ?

ປຣ. ແມ່ນ

ສກ. ອັນໜຶ່ງ ທ່ານຍັງບໍ່ແທງຕະຫຼອດອະກຸບປະທຳ ປະຣິນິບພານໃນຊັ້ນສຸດທາວາດນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ເນື້ອທີ່ຖືກຍິງດ້ວຍລູກສອນແມ່ນຈະໄປໄດ້ໄກກໍຍ່ອມຕາຍ ສັນໃດ ອະນາຄາມີບຸກຄົນເຮັດໃຫ້ແຈ້ງຜົນໃນຊັ້ນສຸດທາວາດນັ້ນ ດ້ວຍມັກທີ່ຕົນຈະເລີນແລ້ວໃນໂລກນີ້ ກໍສັນນັ້ນຄືກັນ

ສກ. ເນື້ອທີ່ຖືກຍິງດ້ວຍລູກສອນແມ່ນຈະໄປໄດ້ໄກກໍຕາຍທັງທີ່ມີລູກສອນຕິດຢູ່ນັ້ນເອງສັນໃດ ອະນາຄາມີບຸກຄົນປະຣິນິບພານໃນຊັ້ນສຸດທາວາດນັ້ນທັງທີ່ຍັງມີລູກສອນ (ມັກ) ຕິດຢູ່ນັ້ນເອງ ດ້ວຍມັກທີ່ຕົນຈະເລີນແລ້ວໃນໂລກນີ້ ສັນນັ້ນຄືກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

**ພົມຈະຣິຍະກະຖາ ຈົບ**

## ໓. (໒) ໂອທິໂສກະຖາ

## ວ່າດ້ວຍການລະກິເລດໄດ້ເປັນສ່ວນ ໆ

[໔໗໔] ສກ. ບຸກຄົນລະກິເລດໄດ້ເປັນສ່ວນ ໆ ແມ່ນບໍ?

ປຣ.໑ ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ ລະສິ່ງໃດໄດ້ດ້ວຍການເຫັນທຸກ

ປຣ. ລະສັກກາຍະທິດຖິ ວິຈິກິດສາ ສີລັບພະຕະປະຣາມາດ ແລະກິເລດທີ່ມີຢູ່ໃນຈິດດວງດຽວກັນກັບກິເລດທັງ ໓ ນັ້ນໄດ້ບາງສ່ວນ

ສກ. ບຸກຄົນ (ຄົນດຽວກັນ) ສ່ວນໜຶ່ງເປັນພຣະໂສດາບັນ ອີກສ່ວນໜຶ່ງບໍ່ເປັນພຣະໂສດາບັນ ສ່ວນໜຶ່ງເປັນຜູ້ເຖິງ ໄດ້ ບັນລຸ ເຮັດໃຫ້ແຈ້ງ ເຂົ້າເຖິງຢູ່ ສຳຜັດໂສດາປັດຕິຜົນດ້ວຍກາຍຢູ່ ອີກສ່ວນໜຶ່ງບໍ່ສຳຜັດດ້ວຍກາຍຢູ່ ສ່ວນໜຶ່ງເປັນພຣະໂສດາບັນຜູ້ສັດຕັກຂັດຕຸປະຣະມະໂກລັງໂກລະ ເອກະພີຊີ ປະກອບດ້ວຍຄວາມເຫຼື້ອມໃສທີ່ບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າ ພຣະທຳ ແລະ ພຣະສົງ ຯລຯ ປະກອບດ້ວຍສິນທີ່ພຣະອະຣິຍະພໍໃຈ ອີກສ່ວນໜຶ່ງບໍ່ປະກອບດ້ວຍສິນທີ່ພຣະອະຣິຍະພໍໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ ລະສິ່ງໃດໄດ້ດ້ວຍການເຫັນສະມຸໄທ

ປຣ. ລະສັກກາຍະທິດຖິ ວິຈິກິດສາ ສີລັບພະຕະປະຣາມາດ ແລະກິເລດທີ່ມີຢູ່ໃນຈິດດວງດຽວກັນກັບກິເລດທັງ ໓ ນັ້ນໄດ້ບາງສ່ວນ

ສກ. ບຸກຄົນ (ຄົນດຽວກັນ) ສ່ວນໜຶ່ງເປັນພຣະໂສດາບັນ ອີກສ່ວນໜຶ່ງບໍ່ເປັນພຣະໂສດາບັນ ຯລຯ ສ່ວນໜຶ່ງປະກອບດ້ວຍສີນທີ່ພຣະອະຣິຍະພໍໃຈ ອີກສ່ວນໜຶ່ງບໍ່ປະກອບດ້ວຍສີນທີ່ພຣະອະຣິຍະພໍໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ ລະສິ່ງໃດໄດ້ດ້ວຍການເຫັນນິໂຣດ

ປຣ. ລະວິຈິກິດສາ ສີລັບພະຕະປະຣາມາດ ແລະກິເລດທີ່ມີຢູ່ໃນຈິດດວງດຽວກັນກັບກິເລດທັງ ໔ ນັ້ນໄດ້ບາງສ່ວນ

ສກ. ບຸກຄົນ (ຄົນດຽວກັນ) ສ່ວນໜຶ່ງເປັນພຣະໂສດາບັນ ອີກສ່ວນໜຶ່ງບໍ່ເປັນພຣະໂສດາບັນ ຯລຯ ສ່ວນໜຶ່ງປະກອບດ້ວຍສີນທີ່ພຣະອະຣິຍະພໍໃຈ ອີກສ່ວນໜຶ່ງບໍ່ປະກອບດ້ວຍສີນທີ່ພຣະອະຣິຍະພໍໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນລະສິ່ງໃດໄດ້ດ້ວຍການເຫັນມັກ

ປຣ. ລະສີລັບພະຕະປະຣາມາດ ແລະກິເລດທີ່ມີຢູ່ໃນຈິດດວງດຽວກັນກັບສີລັບພະຕະປະຣາມາດນັ້ນໄດ້ບາງສ່ວນ

ສກ. ບຸກຄົນ (ຄົນດຽວກັນ) ສ່ວນໜຶ່ງເປັນພຣະໂສດາບັນ ອີກສ່ວນໜຶ່ງບໍ່ເປັນພຣະໂສດາບັນ ສ່ວນໜຶ່ງເປັນຜູ້ເຖິງ ໄດ້ ບັນລຸ ເຮັດໃຫ້ແຈ້ງ ເຂົ້າເຖິງຢູ່ ສຳຜັດໂສດາປັດຕິຜົນດ້ວຍກາຍຢູ່ ອີກສ່ວນໜຶ່ງບໍ່ສຳຜັດດ້ວຍກາຍຢູ່ ສ່ວນໜຶ່ງເປັນພຣະໂສດາບັນຜູ້ສັດຕັກຂັດຕຸປະຣະມະໂກລັງໂກລະ ເອກະພິຊີ ປະກອບດ້ວຍຄວາມເຫຼື້ອມໃສທີ່ບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າ ພຣະທຳ ແລະ ພຣະສົງ ຯລຯ ປະກອບດ້ວຍສີນທີ່ພຣະອະຣິຍະພໍໃຈ ອີກສ່ວນໜຶ່ງບໍ່ປະກອບດ້ວຍສີນທີ່ພຣະອະຣິຍະພໍໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໗໕] ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມິຜົນ ລະສິ່ງໃດໄດ້ດ້ວຍການເຫັນ ທຸກ

ປຣ. ລະກາມຣາຄະຢ່າງຫຍາບ ພະຍາບາດຢ່າງຫຍາບ ແລະກິເລດທີ່ມີຢູ່ໃນຈິດດວງດຽວກັນກັບກິເລດທັງ ໔ ນັ້ນໄດ້ບາງສ່ວນ

ສກ. ບຸກຄົນ (ຄົນດຽວກັນ) ສ່ວນໜຶ່ງເປັນພຣະສະກະທາຄາມີ ອີກສ່ວນໜຶ່ງບໍ່ເປັນພຣະສະກະທາຄາມີ ສ່ວນໜຶ່ງເປັນຜູ້ເຖິງ ໄດ້ ບັນລຸ ເຮັດໃຫ້ແຈ້ງ ເຂົ້າເຖິງຢູ່ ສຳຜັດສະກະທາຄາມີຜົນດ້ວຍກາຍຢູ່ ອີກສ່ວນໜຶ່ງບໍ່ສຳຜັດດ້ວຍກາຍຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມີຜົນ ລະສິ່ງໃດໄດ້ດ້ວຍການເຫັນສະມຸໄທ

ປຣ. ລະກາມຣາຄະຢ່າງຫຍາບ ພະຍາບາດຢ່າງຫຍາບ ແລະກິເລດທີ່ມີຢູ່ໃນຈິດດວງດຽວກັນກັບກິເລດທັງ ໔ ນັ້ນໄດ້ບາງສ່ວນ

ສກ. ບຸກຄົນ (ຄົນດຽວກັນ) ສ່ວນໜຶ່ງເປັນພຣະສະກະທາຄາມີ ອີກສ່ວນໜຶ່ງບໍ່ເປັນພຣະສະກະທາຄາມີ ສ່ວນໜຶ່ງເປັນຜູ້ເຖິງ ໄດ້ ບັນລຸ ເຮັດໃຫ້ແຈ້ງ ເຂົ້າເຖິງຢູ່ ສຳຜັດສະກະທາຄາມີຜົນດ້ວຍກາຍຢູ່ ອີກສ່ວນໜຶ່ງບໍ່ສຳຜັດດ້ວຍກາຍຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມີຜົນ ລະສິ່ງໃດໄດ້ດ້ວຍການເຫັນນິໂຣດ

ປຣ. ລະພະຍາບາດຢ່າງຫຍາບ ແລະກິເລດທີ່ມີຢູ່ໃນຈິດດວງດຽວກັນກັບພະຍາບາດນັ້ນໄດ້ບາງສ່ວນ

ສກ. ບຸກຄົນ (ຄົນດຽວກັນ) ສ່ວນໜຶ່ງເປັນພຣະສະກະທາຄາມີ ອີກສ່ວນໜຶ່ງບໍ່ເປັນພຣະສະກະທາຄາມີ ສ່ວນໜຶ່ງເປັນຜູ້ເຖິງ ໄດ້ ບັນລຸ ເຮັດໃຫ້ແຈ້ງ ເຂົ້າເຖິງຢູ່ ສຳຜັດສະກະທາຄາມີຜົນດ້ວຍກາຍຢູ່ ອີກສ່ວນໜຶ່ງບໍ່ສຳຜັດດ້ວຍກາຍຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມີຜົນ ລະສິ່ງໃດໄດ້ດ້ວຍການເຫັນມັກ

ປຣ. ລະພະຍາບາດຢ່າງຫຍາບ ແລະກິເລດທີ່ມີຢູ່ໃນຈິດດວງດຽວກັນກັບພະຍາບາດນັ້ນໄດ້

ສກ. ບຸກຄົນ (ຄົນດຽວກັນ) ສ່ວນໜຶ່ງເປັນພຣະສະກະທາຄາມີ ອີກສ່ວນໜຶ່ງບໍ່ເປັນພຣະສະກະທາຄາມີ ສ່ວນໜຶ່ງເປັນຜູ້ເຖິງ ໄດ້ ບັນລຸ ເຮັດໃຫ້ແຈ້ງ ເຂົ້າເຖິງຢູ່ ສຳຜັດສະກະທາຄາມີຜົນດ້ວຍກາຍຢູ່ ອີກສ່ວນໜຶ່ງບໍ່ສຳຜັດດ້ວຍກາຍຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໗໖] ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມີຜົນ ລະສິ່ງໃດໄດ້ດ້ວຍການເຫັນທຸກ

ປຣ. ລະກາມຣາຄະຢ່າງລະອຽດ ພະຍາບາດຢ່າງລະອຽດ ແລະກິເລດທີ່ມີຢູ່ໃນຈິດດວງດຽວກັນກັບກິເລດທັງ ໔ ນັ້ນໄດ້ບາງສ່ວນ

ສກ. ບຸກຄົນ (ຄົນດຽວກັນ) ສ່ວນໜຶ່ງເປັນພຣະອະນາຄາມີ ອີກສ່ວນໜຶ່ງບໍ່ເປັນພຣະອະນາຄາມີ ສ່ວນໜຶ່ງເປັນຜູ້ເຖິງ ໄດ້ ບັນລຸ ເຮັດໃຫ້ແຈ້ງ ເຂົ້າເຖິງຢູ່ ສຳຜັດອະນາຄາມີຜົນດ້ວຍກາຍຢູ່ ອີກສ່ວນໜຶ່ງບໍ່ສຳຜັດດ້ວຍກາຍຢູ່ ສ່ວນໜຶ່ງເປັນພຣະອະນາຄາມີຜູ້ອັນຕະຣາປະຣິນິບພາຍີ ຯລຯ ຜູ້ອຸປະຫັດຈະປະຣິນິບພາຍີ ຯລຯ ຜູ້ອະສັງຂາຣະປະຣິນິບພາຍີ ຯລຯ ຜູ້ສະສັງຂາຣະ

ປະຣິນິບພາຍີ ຯລຯ ຜູ້ອຸດທັງໂສໂຕອະກະນິດຖະຄາມີ ອີກສ່ວນໜຶ່ງບໍ່ເປັນພຣະອະນາຄາມີ ຜູ້ອຸດທັງໂສໂຕອະກະນິດຖະຄາມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມີຜົນ ລະສິ່ງໃດໄດ້ດ້ວຍການເຫັນສະມຸໄທ

ປຣ. ລະກາມຣາຄະຢ່າງລະອຽດ ພະຍາບາດຢ່າງລະອຽດ ແລະກິເລດທີ່ມີຢູ່ໃນຈິດດວງດຽວກັນກັບກິເລດທັງ ໘ ນັ້ນໄດ້ບາງສ່ວນ

ສກ. ບຸກຄົນ (ຄົນດຽວກັນ) ສ່ວນໜຶ່ງເປັນພຣະອະນາຄາມີ ອີກສ່ວນໜຶ່ງບໍ່ເປັນພຣະອະນາຄາມີ ຯລຯ ສ່ວນໜຶ່ງເປັນພຣະອະນາຄາມີຜູ້ອຸດທັງໂສໂຕອະກະນິດຖະຄາມີ ອີກສ່ວນໜຶ່ງບໍ່ເປັນພຣະອະນາຄາມີຜູ້ອຸດທັງໂສໂຕອະກະນິດຖະຄາມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມີຜົນ ລະສິ່ງໃດໄດ້ດ້ວຍການເຫັນນິໂຣດ

ປຣ. ລະພະຍາບາດຢ່າງລະອຽດ ແລະກິເລດທີ່ມີຢູ່ໃນຈິດດວງດຽວກັນກັບພະຍາບາດນັ້ນໄດ້ບາງສ່ວນ

ສກ. ບຸກຄົນ (ຄົນດຽວກັນ) ສ່ວນໜຶ່ງເປັນພຣະອະນາຄາມີ ອີກສ່ວນໜຶ່ງບໍ່ເປັນພຣະອະນາຄາມີ ຯລຯ ສ່ວນໜຶ່ງເປັນພຣະອະນາຄາມີຜູ້ອຸດທັງໂສໂຕອະກະນິດຖະຄາມີ ອີກສ່ວນໜຶ່ງບໍ່ເປັນພຣະອະນາຄາມີຜູ້ອຸດທັງໂສໂຕອະກະນິດຖະຄາມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມີຜົນລະສິ່ງໃດໄດ້ດ້ວຍການເຫັນມັກ

ປຣ. ລະກິເລດທີ່ມີຢູ່ໃນຈິດດວງດຽວກັນກັບກິເລດນັ້ນໄດ້

ສກ. ບຸກຄົນ (ຄົນດຽວກັນ) ສ່ວນໜຶ່ງເປັນພຣະອະນາຄາມີ ອີກສ່ວນໜຶ່ງບໍ່ເປັນພຣະອະນາຄາມີ ສ່ວນໜຶ່ງເປັນຜູ້ເຖິງ ໄດ້ ບັນລຸ ເຮັດໃຫ້ແຈ້ງ ເຂົ້າເຖິງຢູ່ ສຳຜັດອະນາຄາມີຜົນດ້ວຍກາຍຢູ່ ອີກສ່ວນໜຶ່ງບໍ່ສຳຜັດດ້ວຍກາຍຢູ່ ສ່ວນໜຶ່ງເປັນພຣະອະນາຄາມີຜູ້ອັນຕະຣາປະຣິນິບພາຍີ ຯລຯ ຜູ້ອຸປະຫັດຈະປະຣິນິບພາຍີ ຯລຯ ຜູ້ອະສັງຂາຣະປະຣິນິບພາຍີ ຯລຯ ຜູ້ສະສັງຂາຣະປະຣິນິບພາຍີ ຯລຯ ຜູ້ອຸດທັງໂສໂຕອະກະນິດຖະຄາມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໗໗] ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ລະສິ່ງໃດໄດ້ດ້ວຍການເຫັນທຸກ

ປຣ. ລະຣູບປະຣາຄະ ອະຣູບປະຣາຄະ ມານະ ອຸດທັດຈະ ອະວິດຊາ ແລະກິເລດທີ່ມີຢູ່ໃນຈິດດວງດຽວກັນກັບກິເລດທັງ ໕ ນັ້ນໄດ້ບາງສ່ວນ

ສກ. ບຸກຄົນ (ຄົນດຽວກັນ) ສ່ວນໜຶ່ງເປັນພຣະອະຣະຫັນ ອີກສ່ວນໜຶ່ງບໍ່ເປັນພຣະອະຣະຫັນ ສ່ວນໜຶ່ງເປັນຜູ້ເຖິງ ໄດ້ ບັນລຸ ເຮັດໃຫ້ແຈ້ງ ເຂົ້າເຖິງຢູ່ ສຳຜັດອະຣະຫັດຕະຜົນດ້ວຍກາຍຢູ່ ອີກສ່ວນໜຶ່ງບໍ່ສຳຜັດດ້ວຍກາຍຢູ່ ສ່ວນໜຶ່ງເປັນຜູ້ປາສະຈາກຣາຄະ ໂທສະ ໂມຫະ ເຮັດກິດ ທີ່ຄວນເຮັດສຳເລັດແລ້ວ ປົງພາລະແລ້ວ ບັນລຸປະໂຫຍດຕົນແລ້ວ ໝົດສິ້ນກິເລດເປັນເຄື່ອງຜູກສັດໄວ້ໃນພົບແລ້ວ ລຸດພົ້ນຍ້ອນຮູ້ຊອບແລ້ວ ຖອດຫຼິ້ມສະລັກ ຖົມຄູ ຖອນເສົາຣະນຽດໄດ້ແລ້ວ ບໍ່ມີບານປະຕູ ເປັນພຣະອະຣິຍະ ປົດທຸງຄືມານະ ວາງພາລະຄືຂັນ ໝົດເຄື່ອງຜູກພັນຊະນະຢ່າງວິເສດແລ້ວ ກຳນົດຮູ້ທຸກ ລະສະມຸໄທ ເຮັດໃຫ້ແຈ້ງນິໂຣດ ຈະເລີນມັກແລ້ວ ຮູ້ຍິ່ງທຳທີ່ຄວນຮູ້ຍິ່ງ ກຳນົດຮູ້ທຳທີ່ຄວນກຳນົດຮູ້ ລະທຳທີ່ຄວນລະ ຈະເລີນທຳທີ່ຄວນຈະເລີນ ເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງແລ້ວ (ສ່ວນໜຶ່ງເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງແລ້ວ) ອີກສ່ວນໜຶ່ງບໍ່ເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງແລ້ວແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ລະສິ່ງໃດໄດ້ດ້ວຍການເຫັນສະມຸໄທ

ປຣ. ລະຣູບປະຣາຄະ ອະຣູບປະຣາຄະ ມານະ ອຸດທັດຈະ ອະວິດຊາ ແລະກິເລດທີ່ມີຢູ່ໃນຈິດດວງດຽວກັນກັບກິເລດທັງ ໕ ນັ້ນໄດ້ບາງສ່ວນ

ສກ. ບຸກຄົນ (ຄົນດຽວກັນ) ສ່ວນໜຶ່ງເປັນພຣະອະຣະຫັນ ອີກສ່ວນໜຶ່ງບໍ່ເປັນພຣະອະຣະຫັນ ຯລຯ ສ່ວນໜຶ່ງເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງ ອີກສ່ວນໜຶ່ງບໍ່ເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ລະສິ່ງໃດໄດ້ດ້ວຍການເຫັນນິໂຣດ

ປຣ. ລະມານະ ອຸດທັດຈະ ອະວິດຊາ ແລະກິເລດທີ່ມີຢູ່ໃນຈິດດວງດຽວກັນກັບກິເລດທັງ ໓ ນັ້ນໄດ້ບາງສ່ວນ

ສກ. ບຸກຄົນ (ຄົນດຽວກັນ) ສ່ວນໜຶ່ງເປັນພຣະອະຣະຫັນ ອີກສ່ວນໜຶ່ງບໍ່ເປັນພຣະອະຣະຫັນ ຯລຯ ສ່ວນໜຶ່ງເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງ ອີກສ່ວນໜຶ່ງບໍ່ເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ລະສິ່ງໃດໄດ້ດ້ວຍການເຫັນມັກ

ປຣ. ລະອຸດທັດຈະ ອະວິດຊາ ແລະກິເລດທີ່ມີຢູ່ໃນຈິດດວງດຽວກັນກັບກິເລດທັງ ໔ ນັ້ນໄດ້

ສກ. ບຸກຄົນ (ຄົນດຽວກັນ) ສ່ວນໜຶ່ງເປັນພຣະອະຣະຫັນ ອີກສ່ວນໜຶ່ງບໍ່ເປັນພຣະອະຣະຫັນ ສ່ວນໜຶ່ງເປັນຜູ້ເຖິງ ໄດ້ ບັນລຸ ເຮັດໃຫ້ແຈ້ງ ເຂົ້າເຖິງຢູ່ ສຳຜັດອະຣະຫັດຕະຜົນ ດ້ວຍກາຍຢູ່ ອີກສ່ວນໜຶ່ງບໍ່ສຳຜັດດ້ວຍກາຍຢູ່ ສ່ວນໜຶ່ງເປັນຜູ້ປາສະຈາກຣາຄະ ໂທສະ ໂມຫະ ເຮັດກິດ ທີ່ຄວນເຮັດສຳເລັດແລ້ວ ປົງພາລະແລ້ວ ບັນລຸປະໂຫຍດຕົນແລ້ວ ໝົດສິ້ນກິເລດເປັນເຄື່ອງຜູກສັດໄວ້ໃນພົບແລ້ວ ລຸດພົ້ນຍ້ອນຮູ້ຊອບແລ້ວ ຖອດຫຼິ້ມສະລັກ ຖົມຄູ ຖອນເສົາຣະນຽດໄດ້ແລ້ວ ບໍ່ມີບານປະຕູ ເປັນພຣະອະຣິຍະ ປົດທຸງຄືມານະ ວາງພາລະຄືຂັນ ໝົດເຄື່ອງຜູກພັນຊະນະຢ່າງວິເສດແລ້ວ ກຳນົດຮູ້ທຸກ ລະສະມຸໄທ ເຮັດໃຫ້ແຈ້ງນິໂຣດ ຈະເລີນມັກ ຮູ້ຍິ່ງທຳທີ່ຄວນຮູ້ຍິ່ງ ກຳນົດຮູ້ທຳທີ່ຄວນກຳນົດຮູ້ ລະທຳທີ່ຄວນລະ ຈະເລີນທຳທີ່ຄວນຈະເລີນ ເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງແລ້ວ ອີກສ່ວນໜຶ່ງບໍ່ເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງແລ້ວແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໗໘] ປຣ. ທ່ານບໍ່ຍອມຮັບວ່າ "ບຸກຄົນລະກິເລດໄດ້ເປັນສ່ວນ ໆ" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

"ຜູ້ມີປັນຍາເພິ່ງກຳຈັດມົນທິນຂອງຕົນ
ເທື່ອລະໜ້ອຍ ໆ ໃນທຸກຂະນະໂດຍລຳດັບ
ເໝືອນຊ່າງຄຳກຳຈັດຂີ້ມ້ຽງຄຳ"[1]

ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ບຸກຄົນລະກິເລດໄດ້ເປັນສ່ວນ ໆ"

ສກ. ບຸກຄົນລະກິເລດໄດ້ເປັນສ່ວນ ໆ ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

"ພຣະໂສດາບັນລະທຳ ໓ ປະການ
ຄື ສັກກາຍະທິດຖິ ວິຈິກິດສາ ສີລັບພະຕະປະຣາມາດ
ໄດ້ຢ່າງໝົດສິ້ນ ພ້ອມກັບການບັນລຸໂສດາປັດຕິມັກ
ພຣະໂສດາບັນກໍພົ້ນຈາກອະບາຍທັງ ໔ ພູມ
ແລະຈະບໍ່ເຮັດອະພິຖານ ໖"

ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ບຸກຄົນລະກິເລດໄດ້ເປັນສ່ວນ ໆ"

ສກ. ບຸກຄົນລະກິເລດໄດ້ເປັນສ່ວນ ໆ ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ໃນສະໄໝທີ່ທຳມະຈັກຂຸທີ່ປາສະຈາກທຸລີ ປາສະຈາກມົນທິນ ເກີດຂຶ້ນແກ່ອະຣິຍະສາວົກວ່າ ສິ່ງໃດສິ່ງໜຶ່ງມີຄວາມເກີດເປັນທຳມະດາ ສິ່ງນັ້ນທັງໝົດມີຄວາມດັບເປັນທຳມະດາ ພ້ອມກັບການເກີດຂຶ້ນແຫ່ງໂສດາປັດຕິມັກ ອະຣິຍະສາວົກຍ່ອມລະສັງໂຍດ ໓ ປະການ ຄື ສັກກາຍະທິດຖິ ວິຈິກິດສາ ສີລັບພະຕະປະຣາມາດ" ໓ ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ບຸກຄົນລະກິເລດໄດ້ເປັນສ່ວນ ໆ"

**ໂອທິໂສກະຖາ ຈົບ**

## ໔. ຊະຫະຕິກະຖາ

## ວ່າດ້ວຍການລະ

### ໑. ນະສຸດຕາຫະຣະນະກະຖາ

### ວ່າດ້ວຍການບໍ່ຍົກພຣະສູດມາອ້າງ

[໔໗໙] ສກ. ປຸຖຸຊົນລະກາມຣາຄະແລະພະຍາບາດໄດ້ແມ່ນບໍ?

ປຣ.໑ ແມ່ນ ໔

ສກ. ລະໄດ້ເດັດຂາດ ລະໄດ້ຢ່າງບໍ່ມີສ່ວນເຫຼືອ ລະໄດ້ຢ່າງບໍ່ມີເຍື່ອໃຍ ລະໄດ້ພ້ອມທັງມູນ ລະໄດ້ພ້ອມທັງຕັນຫາ ລະໄດ້ພ້ອມທັງອະນຸໄສ ລະໄດ້ດ້ວຍອະຣິຍະຍານ ລະໄດ້ ດ້ວຍອະຣິຍະມັກ ຮູ້ແຈ້ງແທງຕະຫຼອດອະກຸບປະທຳຈຶ່ງລະໄດ້ ເຮັດໃຫ້ແຈ້ງອະນາຄາມິຜົນຈຶ່ງລະໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ປຸຖຸຊົນຂົ່ມກາມຣາຄະແລະພະຍາບາດໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຂົ່ມໄດ້ເດັດຂາດ ຂົ່ມໄດ້ຢ່າງບໍ່ມີສ່ວນເຫຼືອ ຂົ່ມໄດ້ຢ່າງບໍ່ມີເຍື່ອໃຍ ຂົ່ມໄດ້ພ້ອມທັງມູນ ຂົ່ມໄດ້ພ້ອມທັງຕັນຫາ ຂົ່ມໄດ້ພ້ອມທັງອະນຸໄສ ຂົ່ມໄດ້ດ້ວຍອະຣິຍະຍານ ຂົ່ມໄດ້ດ້ວຍອະຣິຍະມັກ ຮູ້ແຈ້ງແທງຕະຫຼອດອະກຸບປະທຳຈຶ່ງຂົ່ມໄດ້ ເຮັດໃຫ້ແຈ້ງອະນາຄາມິຜົນ ຈຶ່ງຂົ່ມໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ ລະກາມຣາຄະພະຍາບາດໄດ້ ແລະລະໄດ້ເດັດຂາດ ລະໄດ້ບໍ່ມີສ່ວນເຫຼືອ ຯລຯ ເຮັດໃຫ້ແຈ້ງອະນາຄາມິຜົນຈຶ່ງລະໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ປຸຖຸຊົນລະກາມຣາຄະພະຍາບາດໄດ້ ແລະລະໄດ້ເດັດຂາດ ລະໄດ້ຢ່າງບໍ່ມີສ່ວນເຫຼືອ ຯລຯ ເຮັດໃຫ້ແຈ້ງອະນາຄາມິຜົນຈຶ່ງລະໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ ຂົ່ມກາມຣາຄະພະຍາບາດໄດ້ ແລະຂົ່ມໄດ້ເດັດຂາດ ຂົ່ມໄດ້ຢ່າງບໍ່ມີສ່ວນເຫຼືອ ຯລຯ ເຮັດໃຫ້ແຈ້ງອະນາຄາມິຜົນຈຶ່ງຂົ່ມໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ປຸຖຸຊົນຂົ່ມກາມຣາຄະພະຍາບາດໄດ້ ແລະຂົ່ມໄດ້ເດັດຂາດ ຂົ່ມໄດ້ຢ່າງບໍ່ມີສ່ວນເຫຼືອ ຯລຯ ເຮັດໃຫ້ແຈ້ງອະນາຄາມິຜົນຈຶ່ງຂົ່ມໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ປຸຖຸຊົນລະກາມຣາຄະແລະພະຍາບາດໄດ້ ແຕ່ລະບໍ່ໄດ້ເດັດຂາດ ລະບໍ່ໄດ້ຢ່າງບໍ່ມີສ່ວນເຫຼືອ ລະບໍ່ໄດ້ຢ່າງບໍ່ມີເຍື່ອໃຍ ລະບໍ່ໄດ້ພ້ອມທັງມູນ ລະບໍ່ໄດ້ພ້ອມທັງຕັນຫາ ລະບໍ່ໄດ້ພ້ອມທັງອະນຸໄສ ລະບໍ່ໄດ້ດ້ວຍອະຣິຍະຍານ ລະບໍ່ໄດ້ດ້ວຍອະຣິຍະມັກ ຈະຮູ້ແຈ້ງແທງຕະຫຼອດອະກຸບປະທຳກໍລະບໍ່ໄດ້ ເຮັດໃຫ້ແຈ້ງອະນາຄາມິຜົນກໍລະບໍ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ ລະກາມຣາຄະແລະພະຍາບາດໄດ້ ແຕ່ລະບໍ່ໄດ້ເດັດຂາດ ຯລຯ ຈະເຮັດໃຫ້ແຈ້ງອະນາຄາມິຜົນກໍລະບໍ່ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ປຸຖຸຊົນຂົ່ມກາມຣາຄະແລະພະຍາບາດໄດ້ ແຕ່ລະບໍ່ໄດ້ເດັດຂາດ ຂົ່ມບໍ່ໄດ້ຢ່າງບໍ່ມີສ່ວນເຫຼືອ ຯລຯ ເຮັດໃຫ້ແຈ້ງອະນາຄາມິຜົນກໍຂົ່ມບໍ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ ຂົ່ມກາມຣາຄະພະຍາບາດໄດ້ ແລະຂົ່ມບໍ່ໄດ້ເດັດຂາດ ຂົ່ມບໍ່ໄດ້ຢ່າງບໍ່ມີສ່ວນເຫຼືອ ຯລຯ ເຮັດໃຫ້ແຈ້ງອະນາຄາມິຜົນກໍຂົ່ມບໍ່ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ປຸຖຸຊົນລະກາມຣາຄະແລະພະຍາບາດໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ລະໄດ້ດ້ວຍມັກໃດ

ປຣ. ດ້ວຍມັກຝ່າຍຮູບປາວະຈອນ

ສກ. ມັກຝ່າຍຮູບປາວະຈອນນຳສັດອອກຈາກວັດຕະທຸກ ໃຫ້ເຖິງຄວາມສິ້ນກິເລດ ໃຫ້ເຖິງຄວາມຕັດສະຣູ້ ໃຫ້ເຖິງນິບພານ ບໍ່ເປັນອາລົມຂອງອາສະວະ ບໍ່ເປັນອາລົມຂອງສັງໂຍດ ບໍ່ເປັນອາລົມຂອງຄັນຖະ ບໍ່ເປັນອາລົມຂອງໂອຄະ ບໍ່ເປັນອາລົມຂອງໂຍຄະ ບໍ່ເປັນອາລົມຂອງນິວອນ ບໍ່ເປັນອາລົມຂອງປະຣາມາດ ບໍ່ເປັນອາລົມຂອງອຸປາທານ ບໍ່ເປັນອາລົມຂອງສັງກິເລດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ມັກຝ່າຍຮູບປາວະຈອນບໍ່ນຳສັດອອກຈາກວັດຕະທຸກ ບໍ່ໃຫ້ເຖິງຄວາມສິ້ນກິເລດ ບໍ່ໃຫ້ເຖິງຄວາມຕັດສະຣູ້ ບໍ່ໃຫ້ເຖິງນິບພານ ເປັນອາລົມຂອງອາສະວະເປັນອາລົມຂອງສັງໂຍດ ฯລฯ ເປັນອາລົມຂອງສັງກິເລດບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກມັກຝ່າຍຮູບປາວະຈອນບໍ່ນຳສັດອອກຈາກວັດຕະທຸກ ບໍ່ໃຫ້ເຖິງຄວາມສິ້ນກິເລດ ບໍ່ໃຫ້ເຖິງຄວາມຕັດສະຣູ້ ບໍ່ໃຫ້ເຖິງນິບພານ ເປັນອາລົມຂອງອາສະວະ ເປັນອາລົມຂອງສັງໂຍດ ฯລฯ ເປັນອາລົມຂອງສັງກິເລດ ທ່ານກໍບໍ່ຄວນຍອມຮັບວ່າ "ປຸຖຸຊົນລະການຣາຄະແລະພະຍາບາດໄດ້ດ້ວຍມັກຝ່າຍຮູບປາວະຈອນ"

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ ລະການຣາຄະແລະພະຍາບາດໄດ້ ດ້ວຍອະນາຄາມິມັກ ແລະມັກນັ້ນນຳສັດອອກຈາກວັດຕະທຸກ ໃຫ້ເຖິງຄວາມສິ້ນກິເລດ ໃຫ້ເຖິງຄວາມຕັດສະຣູ້ ໃຫ້ເຖິງນິບພານ ບໍ່ເປັນອາລົມຂອງອາສະວະ ບໍ່ເປັນອາລົມຂອງສັງໂຍດ ฯລฯ ບໍ່ເປັນອາລົມຂອງສັງກິເລດແມ່ນບໍ?

ປຣ. ແມ່ນ

ສກ. ປຸຖຸຊົນລະການຣາຄະ ແລະພະຍາບາດໄດ້ດ້ວຍມັກຝ່າຍຮູບປາວະຈອນ ແລະມັກນັ້ນນຳສັດອອກຈາກວັດຕະທຸກ ໃຫ້ເຖິງຄວາມສິ້ນກິເລດ ໃຫ້ເຖິງຄວາມຕັດສະຣູ້ ໃຫ້ເຖິງນິບພານ ບໍ່ເປັນອາລົມຂອງອາສະວະ ບໍ່ເປັນອາລົມຂອງສັງໂຍດ ฯລฯ ບໍ່ເປັນອາລົມຂອງສັງກິເລດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ປຸຖຸຊົນລະການຣາຄະ ແລະພະຍາບາດໄດ້ດ້ວຍມັກຝ່າຍຮູບປາວະຈອນ ແລະມັກນັ້ນບໍ່ນຳສັດອອກຈາກວັດຕະທຸກ ບໍ່ໃຫ້ເຖິງຄວາມສິ້ນກິເລດ ບໍ່ໃຫ້ເຖິງຄວາມຕັດສະຣູ້ ບໍ່ໃຫ້ເຖິງນິບພານ ເປັນອາລົມຂອງອາສະວະ ເປັນອາລົມຂອງສັງໂຍດ ฯລฯ ເປັນອາລົມຂອງສັງກິເລດແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ ລະການຣາຄະແລະພະຍາບາດໄດ້ດ້ວຍ ອະນາຄາມິມັກ ແລະມັກນັ້ນບໍ່ນຳສັດອອກຈາກວັດຕະທຸກ ບໍ່ໃຫ້ເຖິງຄວາມສິ້ນກິເລດ ບໍ່ໃຫ້ເຖິງຄວາມຕັດສະຣູ້ ບໍ່ໃຫ້ເຖິງນິບພານ ເປັນອາລົມຂອງອາສະວະເປັນອາລົມຂອງສັງໂຍດ ฯລฯ ເປັນອາລົມຂອງສັງກິເລດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໔໗໐] ສກ. ປຸຖຸຊົນຜູ້ປາສະຈາກຄວາມກຳໜັດໃນກາມ ດຳລົງຢູ່ໃນອະນາຄາມິຜົນພ້ອມກັບການໄດ້ບັນລຸທຳແມ່ນບໍ?

ປຣ. ແມ່ນ

ສກ. ດຳລົງຢູ່ໃນອະຣະຫັດຕະຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ປຸຖຸຊົນຜູ້ປາສະຈາກຄວາມກຳໜັດໃນກາມ ດຳລົງຢູ່ໃນອະນາຄາມິຜົນ ພ້ອມກັບການໄດ້ບັນລຸທຳແມ່ນບໍ?

ປຣ. ແມ່ນ

ສກ. ຈະເລີນມັກທັງ ໓ ປະການໄດ້ບໍ່ກ່ອນບໍ່ຫຼັງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຈະເລີນມັກທັງ ໓ ປະການໄດ້ບໍ່ກ່ອນບໍ່ຫຼັງແມ່ນບໍ?

ປຣ. ແມ່ນ

ສກ. ເຮັດໃຫ້ແຈ້ງສາມັນຍະຜົນທັງ ໓ ປະການໄດ້ບໍ່ກ່ອນບໍ່ຫຼັງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ເຮັດໃຫ້ແຈ້ງສາມັນຍະຜົນທັງ ໓ ປະການໄດ້ບໍ່ກ່ອນບໍ່ຫຼັງແມ່ນບໍ?

ປຣ. ແມ່ນ

ສກ. ມີການປະຊຸມແຫ່ງຜັດສະ ໓ ເວທະນາ ໓ ສັນຍາ ໓ ເຈຕະນາ ໓ ຈິດ ໓
ສັດທາ ໓ ວິຣິຍະ ໓ ສະຕິ ໓ ສະມາທິ ໓ ປັນຍາ ໓ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ປຸຖຸຊົນຜູ້ປາສະຈາກຄວາມກຳໜັດໃນກາມ ດຳລົງຢູ່ໃນອະນາຄາມິຜົນພ້ອມກັບການໄດ້ບັນລຸທຳແມ່ນບໍ?

ປຣ. ແມ່ນ

ສກ. ດ້ວຍໂສດາປັດຕິມັກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ດ້ວຍສະກະທາຄາມິມັກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ດ້ວຍມັກໃດ?

ປຣ. ດ້ວຍອະນາຄາມິມັກ

ສກ. ລະສັກກາຍະທິດຖິ ວິຈິກິດສາ ສີລັບພະຕະປະຣາມາດໄດ້ດ້ວຍອະນາຄາມິມັກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

## ໔. ສຸດຕາຫະຣະນະກະຖາ

## ວ່າດ້ວຍການຍົກພຣະສູດມາອ້າງ

[໔໗໑] ສກ. ປຸຖຸຊົນລະສັກກາຍະທິດຖິ ວິຈິກິດສາ ແລະສີລັບພະຕະປະຣາມາດໄດ້ດ້ວຍອະນາຄາມິມັກແມ່ນບໍ?

ປຣ. ແມ່ນ

ສກ. ພຣະຜູ້ມີພຣະພາກເຈົ້າຕັດໂສດາປັດຕິຜົນ (ວ່າມີ) ຍ້ອນລະສັງໂຍດ ໓ ປະການໄດ້ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະຜູ້ມີພຣະພາກເຈົ້າຕັດໂສດາປັດຕິຜົນ (ວ່າມີ) ຍ້ອນລະສັງໂຍດ ໓ ປະການໄດ້ ທ່ານກໍບໍ່ຄວນຍອມຮັບວ່າ "ລະສັກກາຍະທິດຖິ ວິຈິກິດສາ ແລະສີລັບພະຕະປະຣາມາດ ໄດ້ດ້ວຍອະນາຄາມິມັກ" ຯລຯ

ສກ. ປຸຖຸຊົນລະກາມຣາຄະຢ່າງຫຍາບ ແລະພະຍາບາດຢ່າງຫຍາບໄດ້ດ້ວຍອະນາຄາມິມັກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ລະກາມຣາຄະຢ່າງຫຍາບ ແລະພະຍາບາດຢ່າງຫຍາບໄດ້ດ້ວຍອະນາຄາມິມັກແມ່ນບໍ?

ປຣ. ແມ່ນ

ສກ. ພຣະຜູ້ມີພຣະພາກເຈົ້າຕັດສະກະທາຄາມິຜົນ (ວ່າມີ) ຍ້ອນຄວາມເບົາບາງແຫ່ງການຣາຄະ ແລະພະຍາບາດບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະຜູ້ມີພຣະພາກເຈົ້າຕັດສະກະທາຄາມິຜົນ (ວ່າມີ) ຍ້ອນຄວາມເບົາບາງແຫ່ງການຣາຄະແລະພະຍາບາດ ທ່ານກໍບໍ່ຄວນຍອມຮັບວ່າ "ລະການຣາຄະແລະພະຍາບາດຢ່າງຫຍາບໄດ້ດ້ວຍອະນາຄາມິມັກ"

ສກ. ປຸຖຸຊົນເປັນຜູ້ປາສະຈາກຄວາມກຳໜັດໃນກາມ ດຳລົງຢູ່ໃນອະນາຄາມີຜົນ ພ້ອມກັບການໄດ້ບັນລຸທຳແມ່ນບໍ?

ປຣ. ແມ່ນ

ສກ. ເຫຼົ່າຊົນຜູ້ບັນລຸທຳໄດ້ທັງໝົດ ດຳລົງຢູ່ໃນອະນາຄາມີຜົນ ພ້ອມກັບການໄດ້ບັນລຸທຳແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ທ່ານບໍ່ຍອມຮັບວ່າ "ປຸຖຸຊົນລະກາມຣາຄະແລະພະຍາບາດໄດ້" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ຄູທັງ ໖ ຜູ້ມີຍົດ ໄດ້ຮັບຍ້ອງຍໍວ່າເປັນເຈົ້າລັດທິໃນອະດີດ
ເປັນຜູ້ໝົດກິ່ນສາບ ມຸ້ງໝັ້ນໃນກະລຸນາ
ລ່ວງພົ້ນກາມສັງໂຍດ ຄາຍກາມຣາຄະໄດ້ແລ້ວ
ເປັນຜູ້ເຂົ້າເຖິງພົມມະໂລກແລ້ວ
ແມ່ນສາວົກຫຼາຍຮ້ອຍຄົນຂອງຄູເຫຼົ່ານັ້ນ
ກໍເປັນຜູ້ໝົດກິ່ນສາບ ມຸ້ງໝັ້ນໃນກະລຸນາ
ລ່ວງພົ້ນກາມສັງໂຍດ ຄາຍກາມຣາຄະໄດ້ແລ້ວ
ເປັນຜູ້ເຂົ້າເຖິງພົມມະໂລກແລ້ວ"[໔]

ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ປຸຖຸຊົນຈຶ່ງລະກາມຣາຄະແລະພະຍາບາດໄດ້

ສກ. ປຸຖຸຊົນລະກາມຣາຄະແລະພະຍາບາດໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ຄູສຸເນດນັ້ນເປັນຜູ້ມີອາຍຸຍືນຍາວແນວນີ້ ເປັນຜູ້ດຳລົງຢູ່ໄດ້ດົນນານແນວນີ້ ແຕ່ກໍບໍ່ພົ້ນຈາກຊາດ ຊະຣາ ມໍຣະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ອຸປາຍາດ ເຮົາຈຶ່ງກ່າວວ່າ ບໍ່ລຸດພົ້ນຈາກທຸກ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນບໍ່ຮູ້ແຈ້ງແທງຕະຫຼອດທຳ ໔ ປະການ ທຳ ໔ ປະການ ອັນໃດແດ່ ຄື (໑) ຍ້ອນບໍ່ຮູ້ແຈ້ງແທງຕະຫຼອດອະຣິຍະສີນ (໒) ຍ້ອນບໍ່ຮູ້ແຈ້ງແທງຕະຫຼອດອະຣິຍະສະມາທິ (໓) ຍ້ອນບໍ່ຮູ້ແຈ້ງແທງຕະຫຼອດອະຣິຍະປັນຍາ (໔) ຍ້ອນບໍ່ຮູ້ແຈ້ງແທງຕະຫຼອດອະຣິຍະວິມຸດຕິ ພິກຂຸທັງຫຼາຍ ເຮົາໄດ້ຮູ້ແຈ້ງແທງຕະຫຼອດອະຣິຍະສີນ ເຮົາໄດ້ຮູ້ແຈ້ງແທງຕະຫຼອດອະຣິຍະສະມາທິ

ເຮົາໄດ້ຮູ້ແຈ້ງແທງຕະຫຼອດອະຣິຍະປັນຍາ ເຮົາໄດ້ຮູ້ແຈ້ງແທງຕະຫຼອດອະຣິຍະວິມຸດຕິ ເຮົາຖອນພະວະຕັນຫາໄດ້ແລ້ວ ພະວະເນດຕິສິ້ນໄປແລ້ວ ບັດນີ້ ພົບໃໝ່ບໍ່ມີອີກ"

(ພຣະຜູ້ມີພຣະພາກຜູ້ສຸຄົດສາດສະດາ ໄດ້ຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ)

ພຣະໂຄດົມຜູ້ມີຍົດ ຕັດສະຣູ້ທຳເຫຼົ່ານີ້ ຄື
ສີນ ສະມາທິ ປັນຍາ ແລະວິມຸດຕິອັນປະເສີດ
ດັ່ງນັ້ນ ພຣະພຸດທະເຈົ້າຈຶ່ງຕັດບອກທຳ
ແກ່ພິກຂຸທັງຫຼາຍເພື່ອຄວາມຮູ້ຍິ່ງ
ພຣະສາດສະດາຜູ້ມີພຣະຈັກຂຸ
ຊົງກະທຳບ່ອນສຸດແຫ່ງທຸກ ປະຣິນິບພານແລ້ວ"

ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ປຸຖຸຊົນລະການຣາຄະແລະພະຍາບາດໄດ້"

**ຊະຫະຕິກະຖາ ຈົບ**

## ໔. ສັບພະມັດຖິຕິກະຖາ

## ວ່າດ້ວຍສິ່ງທັງປວງມີຢູ່

## ໑. ວາທະຍຸດຕິ

## ວ່າດ້ວຍຫຼັກການໃຊ້ວາທະ

[໔໗໔] ສກ. ສິ່ງທັງປວງມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ສິ່ງທັງປວງມີຢູ່ໃນໂອກາດທັງປວງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ສິ່ງທັງປວງມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ສິ່ງທັງປວງມີຢູ່ໃນການທັງປວງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ສິ່ງທັງປວງມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ສິ່ງທັງປວງມີຢູ່ໂດຍປະການທັງປວງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ສິ່ງທັງປວງມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ສິ່ງທັງປວງມີຢູ່ໃນສະພາວະທຳທັງປວງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ສິ່ງທັງປວງມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນທ່ານເຂົ້າໃຈວ່າ "ສິ່ງທັງປວງບໍ່ປະກອບກັນ" ຈຶ່ງຍອມຮັບວ່າ "ສິ່ງທັງປວງ ມີຢູ່" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ສິ່ງທັງປວງມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ແມ່ນແຕ່ສິ່ງທີ່ບໍ່ມີກໍຊື່ວ່າມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ສິ່ງທັງປວງມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມເຫັນແນວນີ້ວ່າ "ຄວາມເຫັນທີ່ເຫັນວ່າ ສິ່ງທັງປວງມີຢູ່ ເປັນມິດສາທິດຖິ ຄວາມເຫັນນັ້ນ ເປັນສຳມາທິດຖິ" ມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ (ຫຍໍ້)

**ວາທະຍຸດຕິ ຈົບ**

## ໔. ກາລະສັງສັນທະນະ

## ວ່າດ້ວຍການທຽບຄຽງການ

[໔໗໕] ສກ. ອະດີດມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ອະດີດດັບໄປແລ້ວ ຫາຍໄປແລ້ວ ແປຜັນໄປແລ້ວ ສູນໄປແລ້ວ ດັບສູນໄປແລ້ວ ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກອະດີດດັບໄປແລ້ວ ຫາຍໄປແລ້ວ ແປຜັນໄປແລ້ວ ສູນໄປແລ້ວ ດັບສູນໄປແລ້ວ ທ່ານກໍບໍ່ຄວນຍອມຮັບວ່າ "ອະດີດມີຢູ່"

ສກ. ອະນາຄົດມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ອະນາຄົດຍັງບໍ່ເກີດ ຍັງບໍ່ມີ ຍັງບໍ່ເກີດພ້ອມ ຍັງບໍ່ບັງເກີດ ຍັງບໍ່ບັງເກີດຂຶ້ນ ຍັງບໍ່ຜາກົດບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກອະນາຄົດຍັງບໍ່ເກີດ ຍັງບໍ່ມີ ຍັງບໍ່ເກີດພ້ອມ ຍັງບໍ່ບັງເກີດ ຍັງບໍ່ບັງເກີດຂຶ້ນ ຍັງບໍ່ຜາກົດ ທ່ານກໍບໍ່ຄວນຍອມຮັບວ່າ "ອະນາຄົດມີຢູ່"

ສກ. ປັດຈຸບັນມີຢູ່ ປັດຈຸບັນຍັງບໍ່ດັບໄປ ຍັງບໍ່ຫາຍໄປ ຍັງບໍ່ແປຜັນໄປ ຍັງບໍ່ສູນໄປ ຍັງບໍ່ດັບສູນໄປແມ່ນບໍ?

ປຣ. ແມ່ນ

ສກ. ອະດີດມີຢູ່ ອະດີດຍັງບໍ່ດັບ ຍັງບໍ່ຫາຍໄປ ຍັງບໍ່ແປຜັນໄປ ຍັງບໍ່ສູນໄປ ຍັງບໍ່ດັບສູນໄປແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ປັດຈຸບັນມີຢູ່ ປັດຈຸບັນເກີດແລ້ວ ມີແລ້ວ ເກີດພ້ອມແລ້ວ ບັງເກີດແລ້ວ ບັງເກີດຂຶ້ນແລ້ວ ຜາກົດແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ອະນາຄົດມີຢູ່ ອະນາຄົດເກີດແລ້ວ ມີແລ້ວ ເກີດພ້ອມແລ້ວ ບັງເກີດແລ້ວ ບັງເກີດຂຶ້ນແລ້ວ ຜາກົດແລ້ວແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະດີດມີຢູ່ ອະດີດດັບໄປແລ້ວ ຫາຍໄປແລ້ວ ແປຜັນໄປແລ້ວ ສູນໄປແລ້ວ ດັບສູນໄປແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ປັດຈຸບັນມີຢູ່ ປັດຈຸບັນດັບໄປແລ້ວ ຫາຍໄປແລ້ວ ແປຜັນໄປແລ້ວ ສູນໄປແລ້ວ ດັບສູນໄປແລ້ວແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະນາຄົດມີຢູ່ ອະນາຄົດຍັງບໍ່ເກີດ ຍັງບໍ່ມີ ຍັງບໍ່ເກີດພ້ອມ ຍັງບໍ່ບັງເກີດ ຍັງບໍ່ບັງເກີດຂຶ້ນ ຍັງບໍ່ຜາກົດແມ່ນບໍ?

ປຣ. ແມ່ນ

ສກ. ປັດຈຸບັນມີຢູ່ ປັດຈຸບັນຍັງບໍ່ເກີດ ຍັງບໍ່ມີ ຍັງບໍ່ເກີດພ້ອມ ຍັງບໍ່ບັງເກີດ ຍັງບໍ່ບັງເກີດຂຶ້ນ ຍັງບໍ່ຜາກົດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

[໔໗໔] ສກ. ຮູບທີ່ເປັນອະດີດມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນອະດີດດັບໄປແລ້ວ ຫາຍໄປແລ້ວ ແປຜັນໄປແລ້ວ ສູນໄປແລ້ວ ດັບສູນໄປແລ້ວບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຮູບທີ່ເປັນອະດີດດັບໄປແລ້ວ ຯລຯ ດັບສູນໄປແລ້ວ ທ່ານກໍບໍ່ຄວນຍອມຮັບວ່າ "ຮູບທີ່ເປັນອະດີດມີຢູ່"

ສກ. ຮູບທີ່ເປັນອະນາຄົດມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນອະນາຄົດຍັງບໍ່ເກີດ ຍັງບໍ່ມີ ຍັງບໍ່ເກີດພ້ອມ ຍັງບໍ່ບັງເກີດ ຍັງບໍ່ບັງເກີດຂຶ້ນ ຍັງບໍ່ຜາກົດບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຮູບທີ່ເປັນອະນາຄົດຍັງບໍ່ເກີດ ຯລຯ ຍັງບໍ່ຜາກົດ ທ່ານກໍບໍ່ຄວນຍອມຮັບ ວ່າ "ຮູບທີ່ເປັນອະນາຄົດມີຢູ່"

ສກ. ຮູບທີ່ເປັນປັດຈຸບັນມີຢູ່ ຮູບທີ່ເປັນປັດຈຸບັນຍັງບໍ່ດັບໄປ ຍັງບໍ່ຫາຍໄປ ຍັງບໍ່ແປຜັນໄປ ຍັງບໍ່ສູນໄປ ຍັງບໍ່ດັບສູນໄປແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນອະດີດມີຢູ່ ຮູບທີ່ເປັນອະດີດຍັງບໍ່ດັບໄປ ຍັງບໍ່ຫາຍໄປ ຍັງບໍ່ແປຜັນໄປ ຍັງບໍ່ສູນໄປ ຍັງບໍ່ດັບສູນໄປແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ຮູບທີ່ເປັນປັດຈຸບັນມີຢູ່ ຮູບທີ່ເປັນປັດຈຸບັນເກີດແລ້ວ ມີແລ້ວ ເກີດພ້ອມແລ້ວ ບັງເກີດແລ້ວ ບັງເກີດຂຶ້ນແລ້ວ ຜາກົດແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນອະນາຄົດມີຢູ່ ຮູບທີ່ເປັນອະນາຄົດເກີດແລ້ວ ມີແລ້ວ ເກີດພ້ອມແລ້ວ ບັງເກີດແລ້ວ ບັງເກີດຂຶ້ນແລ້ວ ຜາກົດແລ້ວແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ຮູບທີ່ເປັນອະດີດມີຢູ່ ຮູບທີ່ເປັນອະດີດດັບໄປແລ້ວ ຫາຍໄປແລ້ວ ແປຜັນໄປແລ້ວ ສູນໄປແລ້ວ ດັບສູນໄປແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນປັດຈຸບັນມີຢູ່ ຮູບທີ່ເປັນປັດຈຸບັນດັບໄປແລ້ວ ຫາຍໄປແລ້ວ ແປຜັນ ໄປແລ້ວ ສູນໄປແລ້ວ ດັບສູນໄປແລ້ວແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ຮູບທີ່ເປັນອະນາຄົດມີຢູ່ ຮູບທີ່ເປັນອະນາຄົດຍັງບໍ່ເກີດ ຍັງບໍ່ມີ ຍັງບໍ່ເກີດພ້ອມ ຍັງບໍ່ບັງເກີດ ຍັງບໍ່ບັງເກີດຂຶ້ນ ຍັງບໍ່ຜາກົດແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນປັດຈຸບັນມີຢູ່ ຮູບທີ່ເປັນປັດຈຸບັນຍັງບໍ່ເກີດ ຍັງບໍ່ມີ ຍັງບໍ່ເກີດພ້ອມຍັງບໍ່ບັງເກີດ ຍັງບໍ່ບັງເກີດຂຶ້ນ ຍັງບໍ່ຜາກົດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ເວທະນາທີ່ເປັນອະດີດມີຢູ່ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານທີ່ເປັນອະດີດມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ວິນຍານທີ່ເປັນອະດີດດັບໄປແລ້ວ ຫາຍໄປແລ້ວ ແປຜັນໄປແລ້ວ ສູນໄປແລ້ວ ດັບສູນໄປແລ້ວບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກວິນຍານທີ່ເປັນອະດີດດັບໄປແລ້ວ ຯລຯ ດັບສູນໄປແລ້ວ ທ່ານກໍບໍ່ຄວນຍອມຮັບວ່າ "ວິນຍານທີ່ເປັນອະດີດມີຢູ່"

ສກ. ວິນຍານທີ່ເປັນອະນາຄົດມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ວິນຍານທີ່ເປັນອະນາຄົດຍັງບໍ່ເກີດ ຍັງບໍ່ມີ ຍັງບໍ່ເກີດພ້ອມ ຍັງບໍ່ບັງເກີດ ຍັງບໍ່ບັງເກີດຂຶ້ນ ຍັງບໍ່ຜາກົດບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກວິນຍານທີ່ເປັນອະນາຄົດຍັງບໍ່ເກີດ ຯລຯ ຍັງບໍ່ຜາກົດ ທ່ານກໍບໍ່ຄວນຍອມຮັບວ່າ "ວິນຍານທີ່ເປັນອະນາຄົດມີຢູ່"

ສກ. ວິນຍານທີ່ເປັນປັດຈຸບັນມີຢູ່ ວິນຍານທີ່ເປັນປັດຈຸບັນຍັງບໍ່ດັບໄປ ຯລຯ ຍັງບໍ່ດັບສູນໄປແມ່ນບໍ?

ປຣ. ແມ່ນ

ສກ. ວິນຍານທີ່ເປັນອະດີດມີຢູ່ ວິນຍານທີ່ເປັນອະດີດຍັງບໍ່ດັບໄປ ຯລຯ ຍັງບໍ່ດັບສູນໄປແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ວິນຍານທີ່ເປັນປັດຈຸບັນມີຢູ່ ວິນຍານທີ່ເປັນປັດຈຸບັນເກີດແລ້ວ ເກີດມີແລ້ວ ຯລຯ ຜາກົດແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ວິນຍານທີ່ເປັນອະນາຄົດມີຢູ່ ວິນຍານທີ່ເປັນອະນາຄົດເກີດແລ້ວ ຯລຯ ຜາກົດແລ້ວແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ວິນຍານທີ່ເປັນອະດີດມີຢູ່ ວິນຍານທີ່ເປັນອະດີດດັບໄປແລ້ວ ຯລຯ ດັບສູນໄປແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ວິນຍານທີ່ເປັນປັດຈຸບັນມີຢູ່ ວິນຍານທີ່ເປັນປັດຈຸບັນດັບໄປແລ້ວ ຯລຯ ດັບສູນໄປແລ້ວແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ວິນຍານທີ່ເປັນອະນາຄົດມີຢູ່ ວິນຍານທີ່ເປັນອະນາຄົດຍັງບໍ່ເກີດ ຯລຯ ຍັງບໍ່ຜາກົດແມ່ນບໍ?

ປຣ. ແມ່ນ

ສກ. ວິນຍານທີ່ເປັນປັດຈຸບັນມີຢູ່ ວິນຍານທີ່ເປັນປັດຈຸບັນຍັງບໍ່ເກີດ ຍັງບໍ່ມີ ຯລຯ ຍັງບໍ່ຜາກົດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

[໔໗໕] ສກ. ເມື່ອບັນຍັດວ່າ ປັດຈຸບັນກັບຮູບ ຫຼື ບັນຍັດວ່າຮູບກັບປັດຈຸບັນໃຫ້ມີຄວາມໝາຍວ່າປັດຈຸບັນຮູບ ໂດຍບໍ່ແຍກ ປັດຈຸບັນແລະຮູບນີ້ນັ້ນ ມີຄວາມໝາຍແນວດຽວກັນ ສະເໝີກັນ ມີສ່ວນເທົ່າກັນ ມີສະພາບຄືກັນແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນປັດຈຸບັນເມື່ອດັບໄປ ກໍລະຄວາມເປັນປັດຈຸບັນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ລະຄວາມເປັນຮູບໄປດ້ວຍແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອບັນຍັດວ່າ ປັດຈຸບັນກັບຮູບ ຫຼື ບັນຍັດວ່າ ຮູບກັບປັດຈຸບັນໃຫ້ມີຄວາມໝາຍວ່າປັດຈຸບັນຮູບ ໂດຍບໍ່ແຍກ ປັດຈຸບັນແລະຮູບນີ້ນັ້ນ ມີຄວາມໝາຍແນວດຽວກັນ ສະເໝີກັນ ມີສ່ວນເທົ່າກັນ ມີສະພາບຄືກັນແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນປັດຈຸບັນເມື່ອດັບໄປ ບໍ່ລະຄວາມເປັນຮູບແມ່ນບໍ?

ປຣ. ແມ່ນ

ສກ. ບໍ່ລະຄວາມເປັນປັດຈຸບັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ປຣ. ເມື່ອບັນຍັດວ່າ ສີຂາວກັບຜ້າ ຫຼື ບັນຍັດວ່າຜ້າກັບສີຂາວ ໃຫ້ມີຄວາມໝາຍ ວ່າ ຜ້າສີຂາວ ໂດຍບໍ່ແຍກ ສີຂາວແລະຜ້ານີ້ນັ້ນ ມີຄວາມໝາຍແນວດຽວກັນ ສະເໝີກັນ ມີສ່ວນເທົ່າກັນ ມີສະພາບຄືກັນແມ່ນບໍ?

ສກ. ແມ່ນ

ປຣ. ຜ້າຂາວເມື່ອຖືກຍ້ອມຍ່ອມລະຄວາມເປັນຜ້າຂາວໄປດ້ວຍແມ່ນບໍ?

ສກ. ແມ່ນ

ປຣ. ລະຄວາມເປັນຜ້າໄປດ້ວຍແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ

ປຣ. ເມື່ອບັນຍັດວ່າ ສີຂາວກັບຜ້າ ຫຼື ບັນຍັດວ່າຜ້າກັບສີຂາວ ໃຫ້ມີຄວາມໝາຍ ວ່າ ຜ້າສີຂາວ ໂດຍບໍ່ແຍກ ສີຂາວແລະຜ້ານີ້ນັ້ນ ມີຄວາມໝາຍແນວດຽວກັນ ສະເໝີກັນ ມີສ່ວນເທົ່າກັນ ມີສະພາບຄືກັນແມ່ນບໍ?

ສກ. ແມ່ນ

ປຣ. ຜ້າຂາວເມື່ອຖືກຍ້ອມຍ່ອມບໍ່ລະຄວາມເປັນຜ້າໄປດ້ວຍແມ່ນບໍ?

ສກ. ແມ່ນ

ປຣ. ບໍ່ລະຄວາມເປັນຜ້າຂາວແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໗໖] ສກ. ຮູບບໍ່ລະຄວາມເປັນຮູບແມ່ນບໍ?

ປຣ. ແມ່ນ

ສກ. ຮູບທ່ຽງ ຍັ່ງຍືນ ຄົງທີ່ ບໍ່ມີຄວາມແປຜັນໄປເປັນທຳມະດາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບລະຄວາມເປັນຮູບໄດ້ ຍ້ອນເຫດນັ້ນ ຮູບຈຶ່ງບໍ່ທ່ຽງ ບໍ່ຍັ່ງຍືນ ບໍ່ຄົງທີ່ມີຄວາມແປຜັນໄປເປັນທຳມະດາບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຮູບບໍ່ທ່ຽງ ບໍ່ຍັ່ງຍືນ ບໍ່ຄົງທີ່ ມີຄວາມແປຜັນໄປເປັນທຳມະດາ ທ່ານກໍບໍ່ຄວນຍອມຮັບວ່າ “ຮູບບໍ່ລະຄວາມເປັນຮູບ”

ສກ. ນິບພານບໍ່ລະຄວາມເປັນນິບພານ ຍ້ອນເຫດນັ້ນ ນິບພານຈຶ່ງຊື່ວ່າທ່ຽງ ຍັ່ງຍືນ ຄົງທີ່ ບໍ່ມີຄວາມແປຜັນໄປເປັນທຳມະດາແມ່ນບໍ?

ປຣ. ແມ່ນ

ສກ. ຮູບບໍ່ລະຄວາມເປັນຮູບ ຍ້ອນເຫດນັ້ນ ຮູບຈຶ່ງຊື່ວ່າ ທ່ຽງ ຍັ່ງຍືນ ຄົງທີ່ ບໍ່ມີຄວາມແປຜັນໄປເປັນທຳມະດາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບບໍ່ລະຄວາມເປັນຮູບ ຍ້ອນເຫດນັ້ນ ຮູບຈຶ່ງຊື່ວ່າບໍ່ທ່ຽງ ບໍ່ຍັ່ງຍືນ ບໍ່ຄົງທີ່ ມີຄວາມແປຜັນໄປເປັນທຳມະດາແມ່ນບໍ?

ປຣ. ແມ່ນ

ສກ. ນິບພານບໍ່ລະຄວາມເປັນນິບພານ ຍ້ອນເຫດນັ້ນ ນິບພານຈຶ່ງຊື່ວ່າ ບໍ່ທ່ຽງ ບໍ່ຍັ່ງຍືນ ບໍ່ຄົງທີ່ ມີຄວາມແປຜັນໄປເປັນທຳມະດາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະດີດມີຢູ່ ອະດີດບໍ່ລະຄວາມເປັນອະດີດແມ່ນບໍ?

ປຣ. ແມ່ນ

ສກ. ອະນາຄົດມີຢູ່ ອະນາຄົດບໍ່ລະຄວາມເປັນອະນາຄົດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະດີດມີຢູ່ ອະດີດບໍ່ລະຄວາມເປັນອະດີດແມ່ນບໍ?

ປຣ. ແມ່ນ

ສກ. ປັດຈຸບັນມີຢູ່ ປັດຈຸບັນບໍ່ລະຄວາມເປັນປັດຈຸບັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະນາຄົດມີຢູ່ ອະນາຄົດບໍ່ລະຄວາມເປັນອະນາຄົດແມ່ນບໍ?

ປຣ. ແມ່ນ

ສກ. ອະດີດມີຢູ່ ອະດີດບໍ່ລະຄວາມເປັນອະດີດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ປັດຈຸບັນມີຢູ່ ປັດຈຸບັນບໍ່ລະຄວາມເປັນປັດຈຸບັນແມ່ນບໍ?

ປຣ. ແມ່ນ

ສກ. ອະດີດມີຢູ່ ອະດີດບໍ່ລະຄວາມເປັນອະດີດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະດີດມີຢູ່ ອະດີດບໍ່ລະຄວາມເປັນອະດີດແມ່ນບໍ?

ປຣ. ແມ່ນ

ສກ. ອະດີດທ່ຽງ ຍັ່ງຍືນ ຄົງທີ່ ບໍ່ມີຄວາມແປຜັນໄປເປັນທຳມະດາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະດີດບໍ່ທ່ຽງ ບໍ່ຍັ່ງຍືນ ບໍ່ຄົງທີ່ ມີຄວາມແປຜັນໄປເປັນທຳມະດາບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກອະດີດບໍ່ທ່ຽງ ບໍ່ຍັ່ງຍືນ ບໍ່ຄົງທີ່ ມີຄວາມແປຜັນໄປເປັນທຳມະດາ ທ່ານກໍບໍ່ຄວນຍອມຮັບວ່າ "ອະດີດມີຢູ່ ອະດີດບໍ່ລະຄວາມເປັນອະດີດ"

ສກ. ນິບພານມີຢູ່ ນິບພານບໍ່ລະຄວາມເປັນນິບພານ ຍ້ອນເຫດນັ້ນ ນິບພານຈຶ່ງຊື່ວ່າທ່ຽງ ຍັ່ງຍືນ ຄົງທີ່ ບໍ່ມີຄວາມແປຜັນໄປເປັນທຳມະດາແມ່ນບໍ?

ປຣ. ແມ່ນ

ສກ. ອະດີດມີຢູ່ ອະດີດບໍ່ລະຄວາມເປັນອະດີດ ຍ້ອນເຫດນັ້ນ ອະດີດຈຶ່ງຊື່ວ່າທ່ຽງ ຍັ່ງຍືນ ຄົງທີ່ ບໍ່ມີຄວາມແປຜັນໄປເປັນທຳມະດາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະດີດມີຢູ່ ອະດີດບໍ່ລະຄວາມເປັນອະດີດ ຍ້ອນເຫດນັ້ນ ອະດີດຈຶ່ງຊື່ວ່າບໍ່ທ່ຽງ ບໍ່ຍັ່ງຍືນ ບໍ່ຄົງທີ່ ມີຄວາມແປຜັນໄປເປັນທຳມະດາແມ່ນບໍ?

ປຣ. ແມ່ນ

ສກ. ນິບພານມີຢູ່ ນິບພານບໍ່ລະຄວາມເປັນນິບພານ ຍ້ອນເຫດນັ້ນ ນິບພານຈຶ່ງຊື່ວ່າບໍ່ທ່ຽງ ບໍ່ຍັ່ງຍືນ ບໍ່ຄົງທີ່ ມີຄວາມແປຜັນໄປເປັນທັມດາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໗໗] ສກ. ຮູບທີ່ເປັນອະດີດມີຢູ່ ຮູບທີ່ເປັນອະດີດບໍ່ລະຄວາມເປັນອະດີດແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນອະນາຄົດມີຢູ່ ຮູບທີ່ເປັນອະນາຄົດບໍ່ລະຄວາມເປັນອະນາຄົດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບທີ່ເປັນອະດີດມີຢູ່ ຮູບທີ່ເປັນອະດີດບໍ່ລະຄວາມເປັນອະດີດແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນປັດຈຸບັນມີຢູ່ ຮູບທີ່ເປັນປັດຈຸບັນບໍ່ລະຄວາມເປັນປັດຈຸບັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບທີ່ເປັນອະນາຄົດມີຢູ່ ຮູບທີ່ເປັນອະນາຄົດບໍ່ລະຄວາມເປັນອະນາຄົດແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນອະດີດມີຢູ່ ຮູບທີ່ເປັນອະດີດບໍ່ລະຄວາມເປັນອະດີດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບທີ່ເປັນປັດຈຸບັນມີຢູ່ ຮູບທີ່ເປັນປັດຈຸບັນບໍ່ລະຄວາມເປັນປັດຈຸບັນແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນອະດີດມີຢູ່ ຮູບທີ່ເປັນອະດີດບໍ່ລະຄວາມເປັນອະດີດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບທີ່ເປັນອະດີດມີຢູ່ ຮູບທີ່ເປັນອະດີດບໍ່ລະຄວາມເປັນອະດີດແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນອະດີດທ່ຽງ ຍັ່ງຍືນ ຄົງທີ່ ບໍ່ມີຄວາມແປຜັນໄປເປັນທຳມະດາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ຮູບທີ່ເປັນອະດີດບໍ່ທ່ຽງ ບໍ່ຍັ່ງຍືນ ບໍ່ຄົງທີ່ ມີຄວາມແປຜັນໄປເປັນທຳມະດາບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຮູບທີ່ເປັນອະດີດບໍ່ທ່ຽງ ໆລໆ ມີຄວາມແປຜັນໄປເປັນທຳມະດາ ທ່ານກໍບໍ່ຄວນຍອມຮັບວ່າ "ຮູບທີ່ເປັນອະດີດມີຢູ່ ຮູບທີ່ເປັນອະດີດບໍ່ລະຄວາມເປັນອະດີດ"

ສກ. ນິບພານມີຢູ່ ນິບພານບໍ່ລະຄວາມເປັນນິບພານ ນິບພານຈຶ່ງທ່ຽງ ຍັ່ງຍືນ ຄົງທີ່ ບໍ່ມີຄວາມແປຜັນໄປເປັນທຳມະດາແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນອະດີດມີຢູ່ ຮູບທີ່ເປັນອະດີດບໍ່ລະຄວາມເປັນອະດີດ ຮູບທີ່ເປັນອະດີດຈຶ່ງທ່ຽງ ຍັ່ງຍືນ ຄົງທີ່ ບໍ່ມີຄວາມແປຜັນໄປເປັນທຳມະດາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ຮູບທີ່ເປັນອະດີດມີຢູ່ ຮູບທີ່ເປັນອະດີດບໍ່ລະຄວາມເປັນອະດີດ ຮູບທີ່ເປັນອະດີດຈຶ່ງບໍ່ທ່ຽງ ບໍ່ຍັ່ງຍືນ ບໍ່ຄົງທີ່ ມີຄວາມແປຜັນໄປເປັນທຳມະດາແມ່ນບໍ?

ປຣ. ແມ່ນ

ສກ. ນິບພານມີຢູ່ ນິບພານບໍ່ລະຄວາມເປັນນິບພານ ນິບພານຈຶ່ງບໍ່ທ່ຽງ ບໍ່ຍັ່ງຍືນ ບໍ່ຄົງທີ່ ມີຄວາມແປຜັນໄປເປັນທຳມະດາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ເວທະນາທີ່ເປັນອະດີດ ໆລໆ ສັນຍາທີ່ເປັນອະດີດ ໆລໆ ສັງຂານທີ່ເປັນອະດີດ ໆລໆ ວິນຍານທີ່ເປັນອະດີດມີຢູ່ ວິນຍານທີ່ເປັນອະດີດບໍ່ລະຄວາມເປັນອະດີດແມ່ນບໍ?

ປຣ. ແມ່ນ

ສກ. ວິນຍານທີ່ເປັນອະນາຄົດມີຢູ່ ວິນຍານທີ່ເປັນອະນາຄົດບໍ່ລະຄວາມເປັນອະນາຄົດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ວິນຍານທີ່ເປັນອະດີດມີຢູ່ ວິນຍານທີ່ເປັນອະດີດບໍ່ລະຄວາມເປັນອະດີດແມ່ນບໍ?

ປຣ. ແມ່ນ

ສກ. ວິນຍານທີ່ເປັນປັດຈຸບັນມີຢູ່ ວິນຍານທີ່ເປັນປັດຈຸບັນບໍ່ລະຄວາມເປັນປັດຈຸບັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ວິນຍານທີ່ເປັນອະນາຄົດມີຢູ່ ວິນຍານທີ່ເປັນອະນາຄົດບໍ່ລະຄວາມເປັນອະນາຄົດແມ່ນບໍ?

ປຣ. ແມ່ນ

ສກ. ວິນຍານທີ່ເປັນອະດີດມີຢູ່ ວິນຍານທີ່ເປັນອະດີດບໍ່ລະຄວາມເປັນອະດີດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວິນຍານທີ່ເປັນປັດຈຸບັນມີຢູ່ ວິນຍານທີ່ເປັນປັດຈຸບັນບໍ່ລະຄວາມເປັນປັດຈຸບັນແມ່ນບໍ?

ປຣ. ແມ່ນ

ສກ. ວິນຍານທີ່ເປັນອະດີດມີຢູ່ ວິນຍານທີ່ເປັນອະດີດບໍ່ລະຄວາມເປັນອະດີດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວິນຍານທີ່ເປັນອະດີດມີຢູ່ ວິນຍານທີ່ເປັນອະດີດບໍ່ລະຄວາມເປັນອະດີດແມ່ນບໍ?

ປຣ. ແມ່ນ

ສກ. ວິນຍານທີ່ເປັນອະດີດທ່ຽງ ຍັ່ງຍືນ ຄົງທີ່ ບໍ່ມີຄວາມແປຜັນໄປເປັນທຳມະດາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວິນຍານທີ່ເປັນອະດີດບໍ່ທ່ຽງ ບໍ່ຍັ່ງຍືນ ບໍ່ຄົງທີ່ ມີຄວາມແປຜັນໄປເປັນທຳມະດາບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກວິນຍານທີ່ເປັນອະດີດບໍ່ທ່ຽງ ບໍ່ຍັ່ງຍືນ ບໍ່ຄົງທີ່ ມີຄວາມແປຜັນໄປເປັນທຳມະດາ ທ່ານກໍບໍ່ຄວນຍອມຮັບວ່າ "ວິນຍານທີ່ເປັນອະດີດມີຢູ່ ວິນຍານທີ່ເປັນອະດີດບໍ່ລະຄວາມເປັນອະດີດ"

ສກ. ນິບພານມີຢູ່ ນິບພານບໍ່ລະຄວາມເປັນນິບພານ ນິບພານຈຶ່ງທ່ຽງ ຍັ່ງຍືນ ຄົງທີ່ ບໍ່ມີຄວາມແປຜັນໄປເປັນທຳມະດາແມ່ນບໍ?

ປຣ. ແມ່ນ

ສກ. ວິນຍານທີ່ເປັນອະດີດມີຢູ່ ວິນຍານທີ່ເປັນອະດີດບໍ່ລະຄວາມເປັນອະດີດ ວິນຍານທີ່ເປັນອະດີດຈຶ່ງທ່ຽງ ຍັ່ງຍືນ ຄົງທີ່ ບໍ່ມີຄວາມແປຜັນໄປເປັນທຳມະດາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວິນຍານທີ່ເປັນອະດີດມີຢູ່ ວິນຍານທີ່ເປັນອະດີດບໍ່ລະຄວາມເປັນອະດີດ ວິນຍານທີ່ເປັນອະດີດຈຶ່ງບໍ່ທ່ຽງ ບໍ່ຍັ່ງຍືນ ບໍ່ຄົງທີ່ ມີຄວາມແປຜັນໄປເປັນທຳມະດາແມ່ນບໍ?

ປຣ. ແມ່ນ

ສກ. ນິບພານມີຢູ່ ນິບພານບໍ່ລະຄວາມເປັນນິບພານ ນິບພານຈຶ່ງບໍ່ທ່ຽງ ບໍ່ຍັ່ງຍືນ ບໍ່ຄົງທີ່ ມີຄວາມແປຜັນໄປເປັນທຳມະດາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

## ອະຈະນະໂສທະນາ

## ວ່າດ້ວຍການຊັກຟອກຄຳເວົ້າ

[໔໗໗] ສກ. ອະດີດບໍ່ແມ່ນສະພາວະທີ່ມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກອະດີດບໍ່ແມ່ນສະພາວະທີ່ມີຢູ່ ຄຳວ່າ "ອະດີດມີຢູ່" ກໍຜິດ ກໍຫຼືວ່າ ຫາກສະພາວະທີ່ມີຢູ່ບໍ່ແມ່ນອະດີດ ຄຳວ່າ "ສະພາວະທີ່ມີຢູ່ເປັນອະດີດ" ກໍຜິດ

ສກ. ອະນາຄົດບໍ່ແມ່ນສະພາວະທີ່ມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກອະນາຄົດບໍ່ແມ່ນສະພາວະທີ່ມີຢູ່ ຄຳວ່າ "ອະນາຄົດມີຢູ່" ກໍຜິດ ກໍຫຼືວ່າຫາກສະພາວະທີ່ມີຢູ່ບໍ່ແມ່ນອະນາຄົດ ຄຳວ່າ "ສະພາວະທີ່ມີຢູ່ເປັນອະນາຄົດ" ກໍຜິດ

ສກ. ສະພາວະທີ່ມີຢູ່ເປັນອະນາຄົດແລ້ວຈຶ່ງເປັນປັດຈຸບັນແມ່ນບໍ?

ປຣ. ແມ່ນ

ສກ. ອະນາຄົດກັບປັດຈຸບັນເປັນແນວດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະນາຄົດກັບປັດຈຸບັນເປັນແນວດຽວກັນແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທີ່ມີຢູ່ເປັນ (ອະນາຄົດ) ແລ້ວຈຶ່ງເປັນ (ປັດຈຸບັນ) ເປັນ (ປັດຈຸບັນ) ແລ້ວຈຶ່ງເປັນ (ອະນາຄົດ) ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທີ່ມີຢູ່ເປັນ (ອະນາຄົດ) ແລ້ວຈຶ່ງເປັນ (ປັດຈຸບັນ) ເປັນ (ປັດຈຸບັນ) ແລ້ວຈຶ່ງເປັນ (ອະນາຄົດ) ແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທີ່ມີຢູ່ບໍ່ເປັນ (ອະນາຄົດ) ແລ້ວຈຶ່ງບໍ່ເປັນ (ປັດຈຸບັນ) ບໍ່ເປັນ (ປັດຈຸບັນ) ແລ້ວຈຶ່ງບໍ່ເປັນ (ອະນາຄົດ) ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເປັນປັດຈຸບັນແລ້ວຈຶ່ງເປັນອະດີດແມ່ນບໍ?

ປຣ. ແມ່ນ

ສກ. ປັດຈຸບັນກັບອະດີດເປັນແນວດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ປັດຈຸບັນກັບອະດີດເປັນແນວດຽວກັນແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທີ່ມີຢູ່ເປັນ (ປັດຈຸບັນ) ແລ້ວຈຶ່ງເປັນ (ອະດີດ) ເປັນ (ອະດີດ) ແລ້ວຈຶ່ງເປັນ (ປັດຈຸບັນ) ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທີ່ມີຢູ່ເປັນ (ປັດຈຸບັນ) ແລ້ວຈຶ່ງເປັນ (ອະດີດ) ເປັນ (ອະດີດ) ແລ້ວຈຶ່ງເປັນ (ປັດຈຸບັນ) ແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທີ່ມີຢູ່ບໍ່ເປັນ (ປັດຈຸບັນ) ແລ້ວຈຶ່ງບໍ່ເປັນ (ອະດີດ) ບໍ່ເປັນ (ອະດີດ) ແລ້ວຈຶ່ງບໍ່ເປັນ (ປັດຈຸບັນ) ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເປັນອະນາຄົດແລ້ວຈຶ່ງເປັນປັດຈຸບັນ ເປັນປັດຈຸບັນແລ້ວຈຶ່ງເປັນອະດີດແມ່ນບໍ?

ປຣ. ແມ່ນ

ສກ. ອະນາຄົດ ປັດຈຸບັນ ແລະອະດີດເປັນແນວດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະນາຄົດ ປັດຈຸບັນ ແລະອະດີດເປັນແນວດຽວກັນແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທີ່ມີຢູ່ເປັນອະນາຄົດແລ້ວຈຶ່ງເປັນ (ປັດຈຸບັນແລະອະດີດ) ເປັນ (ປັດຈຸບັນແລະອະດີດ) ແລ້ວຈຶ່ງເປັນ (ອະນາຄົດ) ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທີ່ມີຢູ່ເປັນອະນາຄົດແລ້ວຈຶ່ງເປັນ (ປັດຈຸບັນແລະອະດີດ) ເປັນ (ປັດຈຸບັນແລະອະດີດ) ແລ້ວຈຶ່ງເປັນ (ອະນາຄົດ) ແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທີ່ມີຢູ່ບໍ່ເປັນອະນາຄົດແລ້ວ ຈຶ່ງບໍ່ເປັນ (ປັດຈຸບັນແລະອະດີດ) ບໍ່ເປັນ (ປັດຈຸບັນແລະອະດີດ) ແລ້ວຈຶ່ງບໍ່ເປັນອະນາຄົດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

## ອະຕີຕະຈັກຂຸຣູປາທິກະຖາ

## ວ່າດ້ວຍຈັກຂຸແລະຮູບທີ່ເປັນອະດີດ ເປັນຕົ້ນ

[໔໗໑] ສກ. ຈັກຂຸປະສາດ ຣູປາຣົມ ຈັກຂຸວິນຍານ ແສງສະຫວ່າງ ມະນະສິການ ທີ່ເປັນອະດີດມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນເຫັນຮູບທີ່ເປັນອະດີດໄດ້ດ້ວຍຈັກຂຸປະສາດທີ່ເປັນອະດີດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ໂສຕະປະສາດ ສັດທາຣົມ ໂສຕະວິນຍານ ອາກາດທາດ ມະນະສິການທີ່ເປັນອະດີດມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນໄດ້ຍິນສຽງທີ່ເປັນອະດີດໄດ້ດ້ວຍໂສຕະປະສາດທີ່ເປັນອະດີດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຄານະປະສາດ ຄັນທາຣົມ ຄານະວິນຍານ ວາໂຍທາດ ມະນະສິການ ທີ່ເປັນອະດີດມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນດົມກິ່ນທີ່ເປັນອະດີດໄດ້ດ້ວຍຄານະປະສາດທີ່ເປັນອະດີດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຊິວຫາປະສາດ ຣະສາຣົມ ຊິວຫາວິນຍານ ອາໂປທາດ ມະນະສິການ ທີ່ເປັນອະດີດມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຊີມຣົດທີ່ເປັນອະດີດໄດ້ດ້ວຍຊິວຫາປະສາດທີ່ເປັນອະດີດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ກາຍະປະສາດ ໂຜດຖັບພາຣົມ ກາຍວິນຍານ ປະຖະວີທາດ ມະນະສິການ ທີ່ເປັນອະດີດມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຖືກຕ້ອງໂຜດຖັບພະທີ່ເປັນອະດີດໄດ້ດ້ວຍກາຍະປະສາດທີ່ເປັນອະດີດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ມະໂນທະວານ ທຳມາຣົມ ມະໂນວິນຍານ ຫະໄທຍະວັດຖຸ ມະນະສິການທີ່ເປັນອະດີດມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຮູ້ທຳມາຣົມທີ່ເປັນອະດີດໄດ້ດ້ວຍມະໂນທະວານທີ່ເປັນອະດີດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຈັກຂຸປະສາດ ຮູປາຣົມ ຈັກຂຸວິນຍານ ແສງສະຫວ່າງ ມະນະສິການທີ່ເປັນອະນາຄົດ ມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນເຫັນຮູບທີ່ເປັນອະນາຄົດໄດ້ດ້ວຍຈັກຂຸປະສາດທີ່ເປັນອະນາຄົດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂສຕະປະສາດ ຯລຯ ຄານະປະສາດ ຯລຯ ຊິວຫາປະສາດ ຯລຯ ກາຍະປະສາດ ຯລຯ ມະໂນທະວານ ທຳມາຣົມ ມະໂນວິນຍານ ຫະໄທຍະວັດຖຸ ມະນະສິການທີ່ເປັນອະນາຄົດມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຮູ້ທຳມາຣົມທີ່ເປັນອະນາຄົດໄດ້ ດ້ວຍມະໂນທະວານທີ່ເປັນອະນາຄົດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈັກຂຸປະສາດ ຮູປາຣົມ ຈັກຂຸວິນຍານ ແສງສະຫວ່າງ ມະນະສິການທີ່ເປັນປັດຈຸບັນມີຢູ່ ບຸກຄົນເຫັນຮູບທີ່ເປັນປັດຈຸບັນໄດ້ດ້ວຍຈັກຂຸປະສາດທີ່ເປັນປັດຈຸບັນແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂຸປະສາດ ຮູປາຣົມ ຈັກຂຸວິນຍານ ແສງສະຫວ່າງ ມະນະສິການທີ່ເປັນອະດີດມີຢູ່ ບຸກຄົນເຫັນຮູບທີ່ເປັນອະດີດໄດ້ດ້ວຍຈັກຂຸປະສາດທີ່ເປັນອະດີດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂສຕະປະສາດ ຯລຯ ຄານະປະສາດ ຯລຯ ຊິວຫາປະສາດ ຯລຯ ກາຍະປະສາດ ຯລຯ ມະໂນທະວານ ທຳມາຣົມ ມະໂນວິນຍານ ຫະໄທຍະວັດຖຸ ມະນະສິການທີ່ເປັນປັດຈຸບັນມີຢູ່ ບຸກຄົນຮູ້ທຳມາຣົມທີ່ເປັນປັດຈຸບັນໄດ້ ດ້ວຍມະໂນທະ ວານທີ່ເປັນປັດຈຸບັນແມ່ນບໍ?

ປຣ. ແມ່ນ

ສກ. ມະໂນທະວານ ທຳມາຣົມ ມະໂນວິນຍານ ຫະໄທຍະວັດຖຸ ມະນະສິການທີ່ເປັນອະດີດມີຢູ່ ບຸກຄົນຮູ້ທຳມາຣົມທີ່ເປັນອະດີດໄດ້ດ້ວຍມະໂນທະວານທີ່ເປັນອະດີດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈັກຂຸປະສາດ ຮູປາຣົມ ຈັກຂຸວິນຍານ ແສງສະຫວ່າງ ມະນະສິການທີ່ເປັນປັດຈຸບັນມີຢູ່ ບຸກຄົນເຫັນຮູບທີ່ເປັນປັດຈຸບັນໄດ້ດ້ວຍຈັກຂຸປະສາດທີ່ເປັນປັດຈຸບັນແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂຸປະສາດ ຮູປາຣົມ ຈັກຂຸວິນຍານ ແສງສະຫວ່າງ ມະນະສິການທີ່ເປັນອະນາຄົດ ມີຢູ່ ບຸກຄົນເຫັນຮູບທີ່ເປັນອະນາຄົດໄດ້ດ້ວຍຈັກຂຸປະສາດທີ່ເປັນອະນາຄົດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂສຕະປະສາດ ຯລຯ ຄານະປະສາດ ຯລຯ ຊິວຫາປະສາດຯລຯ ກາຍະປະສາດ ຯລຯ ມະໂນທະວານ ທຳມາຣົມ ມະໂນວິນຍານ ຫະໄທຍະວັດຖຸ ມະນະສິການທີ່ເປັນປັດຈຸບັນມີຢູ່ ບຸກຄົນຮູ້ທຳມາຣົມທີ່ເປັນປັດຈຸບັນໄດ້ ດ້ວຍມະໂນທະວານທີ່ເປັນປັດຈຸບັນແມ່ນບໍ?

ປຣ. ແມ່ນ

ສກ. ມະໂນທະວານ ທຳມາຣົມ ມະໂນວິນຍານ ທະໄທຍະວັດຖຸ ມະນະສິການທີ່ເປັນອະນາຄົດມີຢູ່ ບຸກຄົນຮູ້ທຳມາຣົມທີ່ເປັນອະນາຄົດໄດ້ ດ້ວຍມະໂນທະວານທີ່ເປັນອະນາຄົດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈັກຂຸປະສາດ ຣູປາຣົມ ຈັກຂຸວິນຍານ ແສງສະຫວ່າງ ມະນະສິການທີ່ເປັນອະດີດມີຢູ່ ແຕ່ບຸກຄົນບໍ່ເຫັນຮູບທີ່ເປັນອະດີດດ້ວຍຈັກຂຸປະສາດທີ່ເປັນອະດີດແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂຸປະສາດ ຣູປາຣົມ ຈັກຂຸວິນຍານ ແສງສະຫວ່າງ ແລະມະນະສິການທີ່ເປັນປັດຈຸບັນມີຢູ່ ແຕ່ບຸກຄົນບໍ່ເຫັນຮູບທີ່ເປັນປັດຈຸບັນ ດ້ວຍຈັກຂຸປະສາດທີ່ເປັນປັດຈຸບັນ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂສຕະປະສາດ ຯລຯ ຄານະປະສາດ ຯລຯ ຊິວຫາປະສາດ ຯລຯ ກາຍະປະສາດ ຯລຯ ມະໂນທະວານ ທຳມາຣົມ ມະໂນວິນຍານ ທະໄທຍະວັດຖຸ ມະນະສິການທີ່ເປັນອະດີດມີຢູ່ ແຕ່ບຸກຄົນບໍ່ຮູ້ທຳມາຣົມທີ່ເປັນອະດີດດ້ວຍມະໂນທະວານທີ່ເປັນອະດີດແມ່ນບໍ?

ປຣ. ແມ່ນ

ສກ. ມະໂນທະວານ ທຳມາຣົມ ມະໂນວິນຍານ ທະໄທຍະວັດຖຸ ມະນະສິການທີ່ເປັນປັດຈຸບັນ ມີຢູ່ ແຕ່ບຸກຄົນບໍ່ຮູ້ທຳມາຣົມທີ່ເປັນປັດຈຸບັນດ້ວຍມະໂນທະວານທີ່ເປັນປັດຈຸບັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈັກຂຸປະສາດ ຣູປາຣົມ ຈັກຂຸວິນຍານ ແສງສະຫວ່າງ ມະນະສິການທີ່ເປັນອະນາຄົດມີຢູ່ ແຕ່ບຸກຄົນບໍ່ເຫັນຮູບທີ່ເປັນອະນາຄົດດ້ວຍຈັກຂຸປະສາດທີ່ເປັນອະນາຄົດແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂຸປະສາດ ຣູປາຣົມ ຈັກຂຸວິນຍານ ແສງສະຫວ່າງ ມະນະສິການທີ່ເປັນປັດຈຸບັນມີຢູ່ ແຕ່ບຸກຄົນບໍ່ເຫັນຮູບທີ່ເປັນປັດຈຸບັນດ້ວຍຈັກຂຸປະສາດທີ່ເປັນປັດຈຸບັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂສຕະປະສາດ ຯລຯ ຄານະປະສາດ ຯລຯ ຊິວຫາປະສາດ ຯລຯ ກາຍປະສາດ ຯລຯ ມະໂນທະວານ ທຳມາຣົມ ມະໂນວິນຍານ ທະໄທຍະວັດຖຸ ມະນະສິການທີ່ເປັນອະນາຄົດມີຢູ່ ແຕ່ບຸກຄົນບໍ່ຮູ້ທຳມາຣົມທີ່ເປັນອະນາຄົດດ້ວຍມະໂນທະວານທີ່ເປັນອະນາຄົດ ແມ່ນບໍ?

ປຣ. ແມ່ນ

ສກ. ມະໂນທະວານ ທຳມາຣົມ ມະໂນວິນຍານ ທະໄທຍະວັດຖຸ ມະນະສິການທີ່ເປັນປັດຈຸບັນມີຢູ່ ແຕ່ບຸກຄົນບໍ່ຮູ້ທຳມາຣົມທີ່ເປັນປັດຈຸບັນດ້ວຍມະໂນທະວານທີ່ເປັນປັດຈຸບັນ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

## ອະຕີຕະຍານາທິກະຖາ

## ວ່າດ້ວຍຍານທີ່ເປັນອະດີດ ເປັນຕົ້ນ

[໔໙໐] ສກ. ຍານທີ່ເປັນອະດີດມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນເຮັດກິດທີ່ຄວນເຮັດດ້ວຍຍານໄດ້ດ້ວຍຍານນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນເຮັດກິດທີ່ຄວນເຮັດດ້ວຍຍານໄດ້ດ້ວຍຍານນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນກຳນົດຮູ້ທຸກ ລະສະມຸໄທ ເຮັດໃຫ້ແຈ້ງນິໂຣດ ຈະເລີນມັກໄດ້ດ້ວຍຍານນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຍານທີ່ເປັນອະນາຄົດມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນເຮັດກິດທີ່ຄວນເຮັດດ້ວຍຍານໄດ້ດ້ວຍຍານນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນເຮັດກິດທີ່ຄວນເຮັດດ້ວຍຍານໄດ້ດ້ວຍຍານນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນກຳນົດຮູ້ທຸກ ລະສະມຸໄທ ເຮັດໃຫ້ແຈ້ງນິໂຣດ ຈະເລີນມັກໄດ້ດ້ວຍຍານນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຍານທີ່ເປັນປັດຈຸບັນມີຢູ່ ບຸກຄົນເຮັດກິດທີ່ຄວນເຮັດດ້ວຍຍານໄດ້ດ້ວຍຍານນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ຍານທີ່ເປັນອະດີດມີຢູ່ ບຸກຄົນເຮັດກິດທີ່ຄວນເຮັດດ້ວຍຍານໄດ້ດ້ວຍຍານນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຍານທີ່ເປັນປັດຈຸບັນມີຢູ່ ບຸກຄົນກຳນົດຮູ້ທຸກ ລະສະມຸໄທ ເຮັດໃຫ້ແຈ້ງນິໂຣດ ຈະເລີນມັກໄດ້ດ້ວຍຍານນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ຍານທີ່ເປັນອະດີດມີຢູ່ ບຸກຄົນກຳນົດຮູ້ທຸກ ລະສະມຸໄທ ເຮັດໃຫ້ແຈ້ງນິໂຣດ ຈະເລີນມັກໄດ້ດ້ວຍຍານນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຍານທີ່ເປັນປັດຈຸບັນມີຢູ່ ບຸກຄົນເຮັດກິດທີ່ຄວນເຮັດດ້ວຍຍານໄດ້ດ້ວຍຍານນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ຍານທີ່ເປັນອະນາຄົດມີຢູ່ ບຸກຄົນເຮັດກິດທີ່ຄວນເຮັດດ້ວຍຍານໄດ້ດ້ວຍຍານນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຍານທີ່ເປັນປັດຈຸບັນມີຢູ່ ບຸກຄົນກຳນົດຮູ້ທຸກ ລະສະມຸໄທ ເຮັດໃຫ້ແຈ້ງນິໂຣດ ຈະເລີນມັກໄດ້ດ້ວຍຍານນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ຍານທີ່ເປັນອະນາຄົດມີຢູ່ ບຸກຄົນກຳນົດຮູ້ທຸກ ລະສະມຸໄທ ເຮັດໃຫ້ແຈ້ງນິໂຣດ ຈະເລີນມັກໄດ້ດ້ວຍຍານນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຍານທີ່ເປັນອະດີດມີຢູ່ ແຕ່ບຸກຄົນບໍ່ເຮັດກິດທີ່ຄວນເຮັດດ້ວຍຍານໄດ້ດ້ວຍຍານນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ຍານທີ່ເປັນປັດຈຸບັນມີຢູ່ ແຕ່ບຸກຄົນບໍ່ເຮັດກິດທີ່ຄວນເຮັດດ້ວຍຍານໄດ້ດ້ວຍຍານນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຍານທີ່ເປັນອະດີດມີຢູ່ ແຕ່ບຸກຄົນບໍ່ກຳນົດຮູ້ທຸກ ບໍ່ລະສະມຸໄທ ບໍ່ເຮັດໃຫ້ແຈ້ງນິໂຣດ ບໍ່ຈະເລີນມັກໄດ້ດ້ວຍຍານນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ຍານທີ່ເປັນປັດຈຸບັນມີຢູ່ ແຕ່ບຸກຄົນບໍ່ກຳນົດຮູ້ທຸກ ບໍ່ລະສະມຸໄທ ບໍ່ເຮັດໃຫ້ແຈ້ງນິໂຣດ ບໍ່ຈະເລີນມັກໄດ້ດ້ວຍຍານນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຍານທີ່ເປັນອະນາຄົດມີຢູ່ ແຕ່ບຸກຄົນບໍ່ເຮັດກິດທີ່ຄວນເຮັດດ້ວຍຍານໄດ້ດ້ວຍຍານນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ຍານທີ່ເປັນປັດຈຸບັນມີຢູ່ ແຕ່ບຸກຄົນບໍ່ເຮັດກິດທີ່ຄວນເຮັດດ້ວຍຍານໄດ້ດ້ວຍຍານນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຍານທີ່ເປັນອະນາຄົດມີຢູ່ ແຕ່ບຸກຄົນບໍ່ກໍານົດຮູ້ທຸກ ບໍ່ລະສະມຸໄທ ບໍ່ເຮັດໃຫ້ແຈ້ງນິໂຣດ ບໍ່ຈະເລີນມັກໄດ້ດ້ວຍຍານນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ຍານທີ່ເປັນປັດຈຸບັນມີຢູ່ ແຕ່ບຸກຄົນບໍ່ກໍານົດຮູ້ທຸກ ບໍ່ລະສະມຸໄທ ບໍ່ເຮັດໃຫ້ແຈ້ງນິໂຣດ ບໍ່ຈະເລີນມັກໄດ້ດ້ວຍຍານນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

## ອະຣະຫັນຕາທິກະຖາ

## ວ່າດ້ວຍພຣະອະຣະຫັນ ເປັນຕົ້ນ

[໘໙໑] ສກ. ຣາຄະທີ່ເປັນອະດີດຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຊື່ວ່າມີຣາຄະດ້ວຍຣາຄະນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂທສະທີ່ເປັນອະດີດຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຊື່ວ່າມີໂທສະດ້ວຍໂທສະນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂມຫະທີ່ເປັນອະດີດຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຊື່ວ່າມີໂມຫະດ້ວຍໂມຫະນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ມານະທີ່ເປັນອະດີດຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຊື່ວ່າມີມານະດ້ວຍມານະນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ທິດຖິທີ່ເປັນອະດີດຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຊື່ວ່າມີທິດຖິດ້ວຍທິດຖິນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວິຈິກິດສາທີ່ເປັນອະດີດຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຊື່ວ່າມີວິຈິກິດສາດ້ວຍວິຈິກິດສານັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຖີນະທີ່ເປັນອະດີດຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຊື່ວ່າມີຖີນະດ້ວຍຖີນະນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອຸດທັດຈະທີ່ເປັນອະດີດຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຊື່ວ່າມີອຸດທັດຈະດ້ວຍອຸດທັດຈະນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະຫິຣິກະທີ່ເປັນອະດີດຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຊື່ວ່າມີອະຫິຣິກະດ້ວຍອະຫິຣິກະນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະໂນດຕັບປະທີ່ເປັນອະດີດຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຊື່ວ່າມີອະໂນດຕັບປະດ້ວຍອະໂນດຕັບປະນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສັກກາຍະທິດຖິທີ່ເປັນອະດີດຂອງພຣະອະນາຄາມີມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະນາຄາມີຊື່ວ່າມີທິດຖິດ້ວຍທິດຖິນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວິຈິກິດສາທີ່ເປັນອະດີດ ຯລຯ ສີລັບພະຕະປະຣາມາດທີ່ເປັນອະດີດ ຯລຯ ກາມຣາຄະ ຢ່າງລະອຽດທີ່ເປັນອະດີດ ຯລຯ ພະຍາບາດຢ່າງລະອຽດທີ່ເປັນອະດີດຂອງພຣະອະນາຄາມີມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະນາຄາມີຊື່ວ່າມີຈິດພະຍາບາດດ້ວຍພະຍາບາດນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສັກກາຍະທິດຖິທີ່ເປັນອະດີດຂອງພຣະສະກະທາຄາມີມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສະກະທາຄາມີຊື່ວ່າມີທິດຖິດ້ວຍທິດຖິນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ວິຈິກິດສາທີ່ເປັນອະດີດ ฯลฯ ສີລັບພະຕະປະຣາມາດທີ່ເປັນອະດີດ ฯลฯ ກາມຣາຄະຢ່າງຫຍາບທີ່ເປັນອະດີດ ฯลฯ ພະຍາບາດຢ່າງຫຍາບທີ່ເປັນອະດີດຂອງພຣະສະກະທາຄາມີມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສະກະທາຄາມີຊື່ວ່າມີຈິດພະຍາບາດດ້ວຍພະຍາບາດນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ສັກກາຍະທິດຖິທີ່ເປັນອະດີດຂອງພຣະໂສດາບັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂສດາບັນຊື່ວ່າມີທິດຖິດ້ວຍທິດຖິນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ວິຈິກິດສາທີ່ເປັນອະດີດ ฯลฯ ສີລັບພະຕະປະຣາມາດທີ່ເປັນອະດີດ ฯลฯ ຣາຄະທີ່ເປັນເຫດໃຫ້ສັດໄປສູ່ອະບາຍທີ່ເປັນອະດີດ ฯลฯ ໂທສະທີ່ເປັນເຫດໃຫ້ສັດໄປສູ່ອະບາຍທີ່ເປັນອະດີດ ฯลฯ ໂມຫະທີ່ເປັນເຫດໃຫ້ສັດໄປສູ່ອະບາຍທີ່ເປັນອະດີດຂອງພຣະໂສດາບັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂສດາບັນຊື່ວ່າມີໂມຫະດ້ວຍໂມຫະນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

[໔໗໔] ສກ. ຣາຄະທີ່ເປັນອະດີດຂອງປຸຖຸຊົນມີຢູ່ ປຸຖຸຊົນຊື່ວ່າ ມີຣາຄະດ້ວຍຣາຄະ ນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ຣາຄະທີ່ເປັນອະດີດຂອງພຣະອະຣະຫັນມີຢູ່ ພຣະອະຣະຫັນຊື່ວ່າມີຣາຄະດ້ວຍຣາຄະນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ໂທສະທີ່ເປັນອະດີດ ฯลฯ ອະໂນດຕັບປະທີ່ເປັນອະດີດຂອງປຸຖຸຊົນມີຢູ່ ປຸຖຸຊົນຊື່ວ່າ ມີອະໂນດຕັບປະດ້ວຍອະໂນດຕັບປະນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ອະໂນດຕັບປະທີ່ເປັນອະດີດຂອງພຣະອະຣະຫັນມີຢູ່ ພຣະອະຣະຫັນຊື່ວ່າມີອະໂນດຕັບປະ ດ້ວຍອະໂນດຕັບປະນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ສັກກາຍະທິດຖິທີ່ເປັນອະດີດຂອງປຸຖຸຊົນມີຢູ່ ປຸຖຸຊົນຊື່ວ່າມີທິດຖິດ້ວຍທິດຖິນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ສັກກາຍະທິດຖິທີ່ເປັນອະດີດຂອງພຣະອະນາຄາມີມີຢູ່ ພຣະອະນາຄາມີຊື່ວ່າມີທິດຖິ ດ້ວຍທິດຖິນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວິຈິກິດສາທີ່ເປັນອະດີດ ຯລຯ ພະຍາບາດຢ່າງລະອຽດທີ່ເປັນອະດີດຂອງປຸຖຸຊົນມີຢູ່ ປຸຖຸຊົນຊື່ວ່າມີຈິດພະຍາບາດດ້ວຍພະຍາບາດນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ພະຍາບາດຢ່າງລະອຽດທີ່ເປັນອະດີດຂອງພຣະອະນາຄາມີມີຢູ່ ພຣະອະນາຄາມີ ຊື່ວ່າມີຈິດພະຍາບາດດ້ວຍພະຍາບາດນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສັກກາຍະທິດຖິທີ່ເປັນອະດີດຂອງປຸຖຸຊົນມີຢູ່ ປຸຖຸຊົນຊື່ວ່າມີທິດຖິດ້ວຍທິດຖິນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ສັກກາຍະທິດຖິທີ່ເປັນອະດີດຂອງພຣະສະກະທາຄາມີມີຢູ່ ພຣະສະກະທາຄາມີຊື່ວ່າມີທິດຖິ ດ້ວຍທິດຖິນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວິຈິກິດສາທີ່ເປັນອະດີດ ຯລຯ ພະຍາບາດຢ່າງຫຍາບທີ່ເປັນອະດີດຂອງປຸຖຸຊົນມີຢູ່ ປຸຖຸຊົນຊື່ວ່າມີຈິດພະຍາບາດດ້ວຍພະຍາບາດນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ພະຍາບາດຢ່າງຫຍາບທີ່ເປັນອະດີດຂອງພຣະສະກະທາຄາມີມີຢູ່ ພຣະສະກະທາຄາມີ ຊື່ວ່າມີຈິດພະຍາບາດດ້ວຍພະຍາບາດນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສັກກາຍະທິດຖິທີ່ເປັນອະດີດຂອງປຸຖຸຊົນມີຢູ່ ປຸຖຸຊົນຊື່ວ່າມີທິດຖິດ້ວຍທິດຖິນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ສັກກາຍະທິດຖິທີ່ເປັນອະດີດຂອງພຣະໂສດາບັນມີຢູ່ ພຣະໂສດາບັນຊື່ວ່າມີທິດຖິດ້ວຍທິດຖິນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວິຈິກິດສາທີ່ເປັນອະດີດ ฯລฯ ໂມຫະທີ່ເປັນເຫດໃຫ້ສັດໄປສູ່ອະບາຍທີ່ເປັນອະດີດຂອງປຸຖຸຊົນມີຢູ່ ປຸຖຸຊົນຊື່ວ່າມີໂມຫະດ້ວຍໂມຫະນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ໂມຫະທີ່ເປັນເຫດໃຫ້ສັດໄປສູ່ອະບາຍທີ່ເປັນອະດີດຂອງພຣະໂສດາບັນມີຢູ່ ພຣະໂສດາບັນຊື່ວ່າມີໂມຫະດ້ວຍໂມຫະນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຣາຄະທີ່ເປັນອະດີດຂອງພຣະອະຣະຫັນມີຢູ່ ແຕ່ພຣະອະຣະຫັນບໍ່ຊື່ວ່າມີຣາຄະດ້ວຍຣາຄະນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ຣາຄະທີ່ເປັນອະດີດຂອງປຸຖຸຊົນມີຢູ່ ແຕ່ປຸຖຸຊົນບໍ່ຊື່ວ່າມີຣາຄະດ້ວຍຣາຄະນັ້ນ

ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ໂທສະທີ່ເປັນອະດີດ ฯລฯ ອະໂນດຕັບປະທີ່ເປັນອະດີດຂອງພຣະອະຣະຫັນມີຢູ່ ແຕ່ພຣະອະຣະຫັນບໍ່ຊື່ວ່າມີອະໂນດຕັບປະດ້ວຍອະໂນດຕັບປະນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ອະໂນດຕັບປະທີ່ເປັນອະດີດຂອງປຸຖຸຊົນມີຢູ່ ແຕ່ປຸຖຸຊົນບໍ່ຊື່ວ່າມີອະໂນດຕັບປະດ້ວຍອະໂນດຕັບປະນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ສັກກາຍະທິດຖິທີ່ເປັນອະດີດຂອງພຣະອະນາຄາມີມີຢູ່ ແຕ່ພຣະອະນາຄາມີບໍ່ຊື່ວ່າມີທິດຖິດ້ວຍທິດຖິນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ສັກກາຍະທິດຖິທີ່ເປັນອະດີດຂອງປຸຖຸຊົນມີຢູ່ ແຕ່ປຸຖຸຊົນບໍ່ຊື່ວ່າມີທິດຖິດ້ວຍທິດຖິນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ວິຈິກິດສາທີ່ເປັນອະດີດ ฯລฯ ພະຍາບາດຢ່າງລະອຽດທີ່ເປັນອະດີດຂອງພຣະອະນາຄາມີມີຢູ່ ແຕ່ພຣະອະນາຄາມີບໍ່ຊື່ວ່າມີຈິດພະຍາບາດດ້ວຍພະຍາບາດນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ພະຍາບາດຢ່າງລະອຽດທີ່ເປັນອະດີດຂອງປຸຖຸຊົນມີຢູ່ ແຕ່ປຸຖຸຊົນບໍ່ຊື່ວ່າມີຈິດພະຍາບາດດ້ວຍພະຍາບາດນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ສັກກາຍະທິດຖິທີ່ເປັນອະດີດຂອງພຣະສະກະທາຄາມີມີຢູ່ ແຕ່ພຣະສະກະທາຄາມີບໍ່ຊື່ວ່າມີທິດຖິດ້ວຍທິດຖິນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ສັກກາຍະທິດຖິທີ່ເປັນອະດີດຂອງປຸຖຸຊົນມີຢູ່ ແຕ່ປຸຖຸຊົນບໍ່ຊື່ວ່າມີທິດຖິດ້ວຍທິດຖິນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວິຈິກິດສາທີ່ເປັນອະດີດ ຯລຯ ພະຍາບາດຢ່າງຫຍາບທີ່ເປັນອະດີດຂອງພຣະສະກະທາຄາມີມີຢູ່ ແຕ່ພຣະສະກະທາຄາມີບໍ່ຊື່ວ່າ ມີຈິດພະຍາບາດດ້ວຍພະຍາບາດນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ພະຍາບາດຢ່າງຫຍາບທີ່ເປັນອະດີດຂອງປຸຖຸຊົນມີຢູ່ ແຕ່ປຸຖຸຊົນບໍ່ຊື່ວ່າມີຈິດພະຍາບາດດ້ວຍພະຍາບາດນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສັກກາຍະທິດຖິທີ່ເປັນອະດີດຂອງພຣະໂສດາບັນມີຢູ່ ແຕ່ພຣະໂສດາບັນບໍ່ຊື່ວ່າມີທິດຖິດ້ວຍທິດຖິນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ສັກກາຍະທິດຖິທີ່ເປັນອະດີດຂອງປຸຖຸຊົນມີຢູ່ ແຕ່ປຸຖຸຊົນບໍ່ຊື່ວ່າມີທິດຖິດ້ວຍທິດຖິນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວິຈິກິດສາທີ່ເປັນອະດີດ ຯລຯ ໂມຫະທີ່ເປັນເຫດໃຫ້ສັດໄປສູ່ອະບາຍທີ່ເປັນອະດີດຂອງພຣະໂສດາບັນມີຢູ່ ແຕ່ພຣະໂສດາບັນບໍ່ຊື່ວ່າມີໂມຫະດ້ວຍໂມຫະນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ໂມຫະທີ່ເປັນເຫດໃຫ້ສັດໄປສູ່ອະບາຍທີ່ເປັນອະດີດຂອງປຸຖຸຊົນມີຢູ່ ແຕ່ປຸຖຸຊົນບໍ່ຊື່ວ່າມີໂມຫະດ້ວຍໂມຫະນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

## ອະຕີຕະຫັດຖາທິກະຖາ

## ວ່າດ້ວຍມືທີ່ເປັນອະດີດ ເປັນຕົ້ນ

[໔໙໓] ສກ. ມືທີ່ເປັນອະດີດມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອມືທີ່ເປັນອະດີດມີຢູ່ ການຈັບແລະການວາງຍ່ອມຜາກົດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຕີນທີ່ເປັນອະດີດມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອຕີນທີ່ເປັນອະດີດມີຢູ່ ການກ້າວໄປແລະຖອຍກັບຍ່ອມຜາກົດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຂໍ້ພັບທີ່ເປັນອະດີດມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອຂໍ້ພັບທີ່ເປັນອະດີດມີຢູ່ ການຄູ້ເຂົ້າແລະຢຽດອອກຍ່ອມຜາກົດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ທ້ອງທີ່ເປັນອະດີດມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອທ້ອງທີ່ເປັນອະດີດມີຢູ່ ຄວາມຫິວແລະກະຫາຍຍ່ອມຜາກົດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກາຍທີ່ເປັນອະດີດມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ກາຍທີ່ເປັນອະດີດໄດ້ຮັບການຍ້ອງຍໍແລະການລົງໂທດ ໄດ້ຮັບການຕັດແລະການທຳລາຍ ເປັນຂອງທົ່ວໄປແກ່ຝູງກາ ແຮ້ງ ແລ່ວແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຢາພິດ ອາວຸດ ໄຟ ເພິ່ງແຊກຊືມເຂົ້າໄປໃນກາຍທີ່ເປັນອະດີດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກາຍທີ່ເປັນອະດີດຍັງຖືກຈອງຈຳດ້ວຍເຄື່ອງຈອງຈຳຄືຊື່ຄາ ເຄື່ອງຈອງຈຳຄືເຊືອກ ເຄື່ອງຈອງຈຳຄືໂສ້ ເຄື່ອງຈອງຈຳຄືເຮືອນ ເຄື່ອງຈອງຈຳຄືນິຄົມ ເຄື່ອງຈອງຈຳຄືນະຄອນ ເຄື່ອງຈອງຈຳຄືຊົນນະບົດ ດ້ວຍການຈອງຈຳມີການຜູກຢູ່ຄໍເປັນທີ ໕ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ນ້ຳທີ່ເປັນອະດີດມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນເຮັດກິດທີ່ຕ້ອງເຮັດດ້ວຍນ້ຳໄດ້ດ້ວຍນ້ຳນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໄຟທີ່ເປັນອະດີດມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນເຮັດກິດທີ່ຄວນເຮັດດ້ວຍໄຟໄດ້ດ້ວຍໄຟນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ
ສກ. ລົມທີ່ເປັນອະດີດມີຢູ່ແມ່ນບໍ?
ປຣ. ແມ່ນ
ສກ. ບຸກຄົນເຮັດກິດທີ່ຄວນເຮັດດ້ວຍລົມໄດ້ດ້ວຍລົມນັ້ນແມ່ນບໍ?
ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

## ອະຕີຕັກຂັນທາທິສະໂມທານະກະຖາ

## ວ່າດ້ວຍການປະມວນຂັນທີ່ເປັນອະດີດ ເປັນຕົ້ນ

[໔໙໔] ສກ. ຮູບຂັນທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນ ມີຢູ່ແມ່ນບໍ?
ປຣ. ແມ່ນ
ສກ. ຮູບຂັນມີ ໓ ແມ່ນບໍ?
ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ
ສກ. ຂັນ ໕ ທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນ ມີຢູ່ແມ່ນບໍ?
ປຣ. ແມ່ນ
ສກ. ຂັນມີ ໑໕ ແມ່ນບໍ?
ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ
ສກ. ຈັກຂາຍະຕະນະທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນ ມີຢູ່ແມ່ນບໍ?
ປຣ. ແມ່ນ
ສກ. ຈັກຂາຍະຕະນະມີ ໓ ແມ່ນບໍ?
ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ
ສກ. ອາຍະຕະນະ ໑໒ ທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນ ມີຢູ່ແມ່ນບໍ?
ປຣ. ແມ່ນ
ສກ. ອາຍະຕະນະມີ ໓໖ ແມ່ນບໍ?
ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ
ສກ. ຈັກຂຸທາດທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນ ມີຢູ່ແມ່ນບໍ?
ປຣ. ແມ່ນ
ສກ. ຈັກຂຸທາດມີ ໓ ແມ່ນບໍ?
ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ
ສກ. ທາດ ໑໘ ທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນ ມີຢູ່ແມ່ນບໍ?
ປຣ. ແມ່ນ

ສກ. ທາດມີ ໕໔ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈັກຂຸນຊີທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນ ມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂຸນຊີມີ ៣ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອິນຊີ ໒໒ ທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນ ມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ອິນຊີມີ ໖໖ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະເຈົ້າຈັກກະພັດທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນ ມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະເຈົ້າຈັກກະພັດທັງ ៣ ພະອົງຊົງພົບກັນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະສໍາມາສໍາພຸດທະເຈົ້າທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສໍາມາສໍາພຸດທະເຈົ້າທັງ ៣ ພະອົງຊົງພົບກັນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

## ປະທະໂສທະນະກະຖາ

## ວ່າດ້ວຍການຊັກຟອກບົດ

[໒໙໕] ສກ. ອະດີດມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທີ່ມີຢູ່ເປັນອະດີດແມ່ນບໍ?

ປຣ. ສະພາວະທີ່ມີຢູ່ ເປັນອະດີດກໍມີ ບໍ່ເປັນອະດີດກໍມີ

ສກ. ທ່ານຈົ່ງຮັບນິກຄະຫະ ດັ່ງຕໍ່ໄປນີ້ ຫາກອະດີດມີຢູ່ ສະພາວະທີ່ມີຢູ່ເປັນອະດີດກໍມີ ບໍ່ເປັນອະດີດກໍມີ ດັ່ງນັ້ນ ອະດີດຈຶ່ງບໍ່ເປັນອະດີດ ສະພາວະທີ່ບໍ່ແມ່ນອະດີດຈຶ່ງເປັນອະດີດ ທ່ານກ່າວຄໍາຂັດແຍ່ງໃດໃນຕອນຕົ້ນນັ້ນວ່າ "ຂ້າພະເຈົ້າຍອມຮັບວ່າ ອະດີດມີຢູ່ ສະພາວະທີ່ມີຢູ່ເປັນອະດີດກໍມີ ບໍ່ເປັນອະດີດກໍມີ ດັ່ງນັ້ນ ອະດີດຈຶ່ງບໍ່ເປັນອະດີດ ສະພາວະທີ່ບໍ່ແມ່ນອະດີດຈຶ່ງເປັນອະດີດ" ຄໍານັ້ນຂອງທ່ານຜິດ

ອັນໜຶ່ງ ຫາກທ່ານບໍ່ຍອມຮັບວ່າ "ອະດີດມີຢູ່ ສະພາວະທີ່ບໍ່ແມ່ນອະດີດ ເປັນອະດີດ" ທ່ານກໍບໍ່ຄວນຍອມຮັບວ່າ "ອະດີດມີຢູ່ ສະພາວະທີ່ມີຢູ່ເປັນອະດີດກໍມີ ບໍ່ເປັນອະດີດກໍມີ" ທ່ານກ່າວຄຳຂັດແຍ່ງໃດໃນຕອນຕົ້ນນັ້ນວ່າ "ຂ້າພະເຈົ້າຍອມຮັບວ່າ ອະດີດມີຢູ່ ສະພາວະທີ່ມີຢູ່ເປັນອະດີດກໍມີ ບໍ່ເປັນອະດີດກໍມີ ດັ່ງນັ້ນ ອະດີດຈຶ່ງບໍ່ເປັນອະດີດ ສະພາວະທີ່ບໍ່ເປັນອະດີດຈຶ່ງເປັນອະດີດ" ຄຳນັ້ນຂອງທ່ານຜິດ

ສກ. ອະນາຄົດມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທີ່ມີຢູ່ເປັນອະນາຄົດແມ່ນບໍ?

ປຣ. ສະພາວະທີ່ມີຢູ່ເປັນອະນາຄົດກໍມີ ບໍ່ເປັນອະນາຄົດກໍມີ

ສກ. ທ່ານຈົ່ງຮັບນິກາຄະຫະ ດັ່ງຕໍ່ໄປນີ້

ຫາກອະນາຄົດມີຢູ່ ສະພາວະທີ່ມີຢູ່ເປັນອະນາຄົດກໍມີ ບໍ່ເປັນອະນາຄົດກໍມີ ດັ່ງນັ້ນ ອະນາຄົດຈຶ່ງບໍ່ເປັນອະນາຄົດ ສະພາວະທີ່ບໍ່ເປັນອະນາຄົດຈຶ່ງເປັນອະນາຄົດ ທ່ານກ່າວຄຳຂັດແຍ່ງໃດໃນຕອນຕົ້ນນັ້ນວ່າ "ຂ້າພະເຈົ້າຍອມຮັບວ່າ ອະນາຄົດມີຢູ່ ສະພາວະທີ່ມີຢູ່ເປັນອະນາຄົດກໍມີ ບໍ່ເປັນອະນາຄົດກໍມີ ດັ່ງນັ້ນ ອະນາຄົດຈຶ່ງບໍ່ເປັນອະນາຄົດ ສະພາວະທີ່ບໍ່ເປັນອະນາຄົດຈຶ່ງເປັນອະນາຄົດ" ຄຳນັ້ນຂອງທ່ານຜິດ

ອັນໜຶ່ງ ຫາກທ່ານບໍ່ຍອມຮັບວ່າ "ອະນາຄົດບໍ່ເປັນອະນາຄົດ ສະພາວະທີ່ບໍ່ເປັນອະນາຄົດເປັນອະນາຄົດ" ທ່ານກໍບໍ່ຄວນຍອມຮັບວ່າ "ອະນາຄົດມີຢູ່ ສະພາວະທີ່ມີຢູ່ ເປັນອະນາຄົດກໍມີ ບໍ່ເປັນອະນາຄົດກໍມີ" ທ່ານກ່າວຄຳຂັດແຍ່ງໃດໃນຕອນຕົ້ນນັ້ນວ່າ "ຂ້າພະເຈົ້າຍອມຮັບວ່າ ອະນາຄົດມີຢູ່ ສະພາວະທີ່ມີຢູ່ເປັນອະນາຄົດກໍມີ ບໍ່ເປັນອະນາຄົດກໍມີ ດັ່ງນັ້ນ ອະນາຄົດຈຶ່ງບໍ່ເປັນອະນາຄົດ ສະພາວະທີ່ບໍ່ເປັນອະນາຄົດຈຶ່ງເປັນອະນາຄົດ" ຄຳນັ້ນຂອງທ່ານຜິດ

ປຣ. ປັດຈຸບັນມີຢູ່ແມ່ນບໍ?

ສກ. ແມ່ນ

ປຣ. ສະພາວະທີ່ມີຢູ່ເປັນປັດຈຸບັນແມ່ນບໍ?

ສກ. ສະພາວະທີ່ມີຢູ່ເປັນປັດຈຸບັນກໍມີ ບໍ່ເປັນປັດຈຸບັນກໍມີ

ປຣ. ທ່ານຈົ່ງຮັບນິກາຄະຫະ ດັ່ງຕໍ່ໄປນີ້

ຫາກປັດຈຸບັນມີຢູ່ ສະພາວະທີ່ມີຢູ່ເປັນປັດຈຸບັນກໍມີ ບໍ່ເປັນປັດຈຸບັນກໍມີ ດັ່ງນັ້ນ ປັດຈຸບັນຈຶ່ງບໍ່ເປັນປັດຈຸບັນ ສະພາວະທີ່ບໍ່ເປັນປັດຈຸບັນຈຶ່ງເປັນປັດຈຸບັນ ທ່ານກ່າວຄຳຂັດແຍ້ງໃດໃນຕອນຕົ້ນນັ້ນວ່າ "ຂ້າພະເຈົ້າຍອມຮັບວ່າ ປັດຈຸບັນມີຢູ່ ສະພາວະທີ່ມີຢູ່ເປັນປັດຈຸບັນກໍມີ ບໍ່ເປັນປັດຈຸບັນກໍມີ ດັ່ງນັ້ນ ປັດຈຸບັນຈຶ່ງບໍ່ເປັນປັດຈຸບັນ ສະພາວະທີ່ບໍ່ເປັນປັດຈຸບັນຈຶ່ງເປັນປັດຈຸບັນ" ຄຳນັ້ນຂອງທ່ານຜິດ

ອັນໜຶ່ງ ຫາກທ່ານບໍ່ຍອມຮັບວ່າ "ປັດຈຸບັນບໍ່ເປັນປັດຈຸບັນ ສະພາວະທີ່ບໍ່ເປັນປັດຈຸບັນເປັນປັດຈຸບັນ" ທ່ານກໍບໍ່ຄວນຍອມຮັບວ່າ "ປັດຈຸບັນມີຢູ່ ສະພາວະທີ່ມີຢູ່ເປັນປັດຈຸບັນກໍມີ ບໍ່ເປັນປັດຈຸບັນກໍມີ" ທ່ານກ່າວຄຳຂັດແຍ່ງໃດໃນຕອນຕົ້ນນັ້ນວ່າ "ຂ້າພະເຈົ້າຍອມຮັບວ່າ ປັດຈຸບັນມີຢູ່ ສະພາວະທີ່ມີຢູ່ເປັນປັດຈຸບັນກໍມີ ບໍ່ເປັນປັດຈຸບັນກໍມີ ດັ່ງນັ້ນ ປັດຈຸບັນຈຶ່ງບໍ່ເປັນປັດຈຸບັນ ສະພາວະທີ່ບໍ່ເປັນປັດຈຸບັນຈຶ່ງເປັນປັດຈຸບັນ" ຄຳນັ້ນຂອງທ່ານຜິດ

ປຣ. ນິບພານມີຢູ່ແມ່ນບໍ?

ສກ. ແມ່ນ

ປຣ. ສະພາວະທີ່ມີຢູ່ເປັນນິບພານແມ່ນບໍ?

ສກ. ສະພາວະທີ່ມີຢູ່ເປັນນິບພານກໍມີ ບໍ່ເປັນນິບພານກໍມີ

ປຣ. ທ່ານຈົ່ງຮັບນິກຄະຫະດັ່ງຕໍ່ໄປນີ້

ຫາກນິບພານມີຢູ່ ສະພາວະທີ່ມີຢູ່ເປັນນິບພານກໍມີ ບໍ່ເປັນນິບພານກໍມີ ດັ່ງນັ້ນ ນິບພານຈຶ່ງບໍ່ແມ່ນນິບພານ ສະພາວະທີ່ບໍ່ແມ່ນນິບພານຈຶ່ງເປັນນິບພານ ທ່ານກ່າວຄຳຂັດແຍ່ງໃດໃນຕອນຕົ້ນນັ້ນວ່າ "ຂ້າພະເຈົ້າຍອມຮັບວ່າ ນິບພານມີຢູ່ ສະພາວະທີ່ມີຢູ່ເປັນນິບພານກໍມີ ບໍ່ເປັນນິບພານກໍມີ ດັ່ງນັ້ນ ນິບພານຈຶ່ງບໍ່ແມ່ນນິບພານ ສະພາວະທີ່ບໍ່ແມ່ນນິບພານຈຶ່ງເປັນນິບພານ" ຄຳນັ້ນຂອງທ່ານຜິດ

ອັນໜຶ່ງ ຫາກທ່ານບໍ່ຍອມຮັບວ່າ "ນິບພານບໍ່ແມ່ນນິບພານ ສະພາວະທີ່ບໍ່ແມ່ນນິບພານເປັນນິບພານ" ທ່ານກໍບໍ່ຄວນຍອມຮັບວ່າ "ນິບພານມີຢູ່ ສະພາວະທີ່ມີຢູ່ເປັນນິບພານກໍມີ ບໍ່ເປັນນິບພານກໍມີ" ທ່ານກ່າວຄຳຂັດແຍ່ງໃດໃນຕອນຕົ້ນນັ້ນວ່າ "ຂ້າພະເຈົ້າຍອມຮັບວ່າ ນິບພານມີຢູ່ ສະພາວະທີ່ມີຢູ່ເປັນນິບພານກໍມີ ບໍ່ເປັນນິບພານກໍມີ ດັ່ງນັ້ນ ນິບພານຈຶ່ງບໍ່ແມ່ນນິບພານ ສະພາວະທີ່ບໍ່ແມ່ນນິບພານຈຶ່ງເປັນນິບພານ" ຄຳນັ້ນຂອງທ່ານຜິດ

## ສຸດຕະສາທະນະ

## ວ່າດ້ວຍການອ້າງພຣະສູດ

[໔໙໕] ປຣ. ທ່ານບໍ່ຍອມຮັບວ່າ "ອະດີດມີຢູ່ ອະນາຄົດມີຢູ່" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ຮູບແນວໃດແນວໜຶ່ງຄື ຮູບທີ່ເປັນອະດີດ ຮູບທີ່ເປັນອະນາຄົດ ຮູບທີ່ເປັນປັດຈຸບັນ ຮູບທີ່ເປັນພາຍໃນຕົນ ຮູບທີ່ເປັນພາຍນອກຕົນ ຮູບຫຍາບ ຮູບລະອຽດ ຮູບຊັ້ນຕ່ຳ ຮູບຊັ້ນປະນີດ ຮູບໄກ ຫຼືຮູບໃກ້ ປະມວນເຂົ້າເປັນກອງດຽວກັນ ນີ້ຮຽກວ່າ ຮູບຂັນ ເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ວິນຍານ

ແນວໃດແນວໜຶ່ງ ຄືວິນຍານທີ່ເປັນອະດີດ ວິນຍານທີ່ເປັນອະນາຄົດ ວິນຍານທີ່ເປັນປັດຈຸບັນ ວິນຍານທີ່ເປັນພາຍໃນຕົນ ວິນຍານທີ່ເປັນພາຍນອກຕົນ ວິນຍານຫຍາບ ວິນຍານລະອຽດ ວິນຍານຊັ້ນຕ່ຳ ວິນຍານຊັ້ນປະນີດ ວິນຍານໄກ ຫຼື ວິນຍານໃກ້ ປະມວນເຂົ້າເປັນກອງດຽວກັນ ນີ້ຮຽກວ່າ

ວິນຍານຂັນ"[໑] ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ອະດີດຈຶ່ງມີຢູ່ ອະນາຄົດກໍມີຢູ່

ສກ. ອະດີດມີຢູ່ ອະນາຄົດກໍມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ຫຼັກການ ໓ ປະການນີ້ ຄື (໑) ຫຼັກພາສາ (໒) ຫຼັກການຕັ້ງຊື່ (໓) ຫຼັກການບັນຍັດ ໃນອະດີດ ບໍ່ຖືກລຶບລ້າງແລ້ວ ບໍ່ເຄີຍຖືກລຶບລ້າງ ໃນປັດຈຸບັນບໍ່ຖືກລຶບລ້າງ ໃນອະນາຄົດກໍຈັກບໍ່ຖືກລຶບລ້າງ ບໍ່ຖືກສະມະນະພາມຜູ້ຮູ້ຄັດຄ້ານ ຫຼັກການ ໓ ປະການ ເປັນແນວໃດ? ຄື (໑) ຮູບໃດລ່ວງໄປ ດັບໄປ ແປຜັນໄປແລ້ວ ຮຽກຮູບນັ້ນວ່າ "ໄດ້ມີແລ້ວ" ຕັ້ງຊື່ຮູບນັ້ນວ່າ "ໄດ້ມີແລ້ວ" ບັນຍັດຮູບນັ້ນວ່າ "ໄດ້ມີແລ້ວ" (ແຕ່) ບໍ່ຮຽກຮູບນັ້ນວ່າ "ມີຢູ່" ບໍ່ຮຽກ ຮູບນັ້ນວ່າ "ຈັກມີ" ເວທະນາໃດ ຯລຯ ສັນຍາໃດ ຯລຯ ສັງຂານໃດ ຯລຯ ວິນຍານໃດລ່ວງໄປ ດັບໄປ ແປຜັນໄປແລ້ວ ຮຽກວິນຍານນັ້ນວ່າ "ໄດ້ມີແລ້ວ" ຕັ້ງຊື່ວິນຍານນັ້ນວ່າ "ໄດ້ມີແລ້ວ" ບັນຍັດວິນຍານນັ້ນວ່າ "ໄດ້ມີແລ້ວ" (ແຕ່) ບໍ່ຮຽກວິນຍານນັ້ນວ່າ "ມີຢູ່" ບໍ່ຮຽກວິນຍານນັ້ນວ່າ "ຈັກມີ" (໒) ຮູບໃດຍັງບໍ່ເກີດ ຍັງບໍ່ຜາກົດ ຮຽກຮູບນັ້ນວ່າ "ຈັກມີ" ຕັ້ງຊື່ຮູບນັ້ນວ່າ "ຈັກມີ" ບັນຍັດຮູບນັ້ນວ່າ "ຈັກມີ" (ແຕ່) ບໍ່ຮຽກຮູບນັ້ນວ່າ "ມີຢູ່" ບໍ່ຮຽກຮູບນັ້ນວ່າ "ໄດ້ມີແລ້ວ" ເວທະນາໃດ ຯລຯ ສັນຍາໃດ ຯລຯ ສັງຂານໃດ ຯລຯ ວິນຍານໃດຍັງບໍ່ເກີດ ຍັງບໍ່ຜາກົດ ຮຽກວິນຍານນັ້ນວ່າ "ຈັກມີ" ຕັ້ງຊື່ວິນຍານ ນັ້ນວ່າ "ຈັກມີ" ບັນຍັດວິນຍານນັ້ນວ່າ "ຈັກມີ" (ແຕ່) ບໍ່ຮຽກວິນຍານນັ້ນວ່າ "ມີຢູ່" ບໍ່ຮຽກວິນຍານນັ້ນວ່າ "ໄດ້ມີແລ້ວ" (໓) ຮູບໃດເກີດຢູ່ ຜາກົດຢູ່ ຮຽກຮູບນັ້ນວ່າ "ມີຢູ່" ຕັ້ງຊື່ຮູບນັ້ນວ່າ "ມີຢູ່" ບັນຍັດຮູບນັ້ນວ່າ "ມີຢູ່" (ແຕ່) ບໍ່ຮຽກຮູບນັ້ນວ່າ "ໄດ້ມີແລ້ວ" ບໍ່ຮຽກຮູບນັ້ນວ່າ "ຈັກມີ" ເວທະນາໃດ ຯລຯ ສັນຍາໃດ ຯລຯ ສັງຂານໃດ ຯລຯ ວິນຍານໃດເກີດແລ້ວ ຜາກົດຢູ່ ຮຽກວິນຍານນັ້ນວ່າ "ມີຢູ່" ຕັ້ງຊື່ວິນຍານນັ້ນວ່າ ມີຢູ່" ບັນຍັດວິນຍານນັ້ນວ່າ "ມີຢູ່" (ແຕ່) ບໍ່ຮຽກວິນຍານນັ້ນວ່າ "ໄດ້ມີແລ້ວ" ບໍ່ຮຽກວິນຍານນັ້ນວ່າ "ຈັກມີ" ພິກຂຸທັງຫຼາຍ ຫຼັກການ ໓ ປະການ ຄື (໑) ຫຼັກພາສາ (໒) ຫຼັກການຕັ້ງຊື່ (໓) ຫຼັກການບັນຍັດ ໃນອະດີດບໍ່ຖືກລຶບລ້າງແລ້ວ ບໍ່ເຄີຍຖືກລຶບລ້າງ ໃນປັດຈຸບັນບໍ່ຖືກລຶບລ້າງ ໃນອະນາຄົດກໍຈັກບໍ່ຖືກລຶບລ້າງ ບໍ່ຖືກສະມະນະພາມຜູ້ຮູ້ຄັດຄ້ານ

ພິກຂຸທັງຫຼາຍ ແມ່ນຊົນຊາວອຸກກະລະຊົນນະບົດກັບຊົນຊາວວັດສະພັນຍະຊົນນະບົດທັງ ໒ ພວກ ເປັນຜູ້ຖືອະເຫຕຸກະວາທະ ເປັນຜູ້ຖືອະກິຣິຍະວາທະ ເປັນຜູ້ຖືນັດຖິກະວາທະໄດ້ສຳຄັນ

ຫຼັກການ ໓ ປະການ ຄື (໑) ຫຼັກພາສາ (໒) ຫຼັກການຕັ້ງຊື່ (໓) ຫຼັກການບັນຍັດ ວ່າບໍ່ ຄວນ ຕິຕຽນ ບໍ່ຄວນຄັດຄ້ານ ຂໍ້ນັ້ນຍ້ອນເຫດໃດ ຍ້ອນຢ້ານຖືກນິນທາ ໃສ່ໂທດແລະຖືກຄັດຄ້ານ" ໔ ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ອະດີດມີຢູ່ ອະນາຄົດມີຢູ່"

ສກ. ອະດີດມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດນີ້ວ່າ "ທ່ານພຣະຜັກຄຸນະໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າ ແຕ່ພະອົງຜູ້ຈະເລີນ ບຸກຄົນເມື່ອຈະບັນຍັດພຣະພຸດທະເຈົ້າທັງຫຼາຍໃນອະດີດ ຜູ້ຕັດທຳເປັນ ເຄື່ອງລ້າຊ້າ ຜູ້ຕັດທາງໄດ້ແລ້ວ ຜູ້ຄອບງຳວັດຕະໄດ້ແລ້ວ ຜູ້ລ່ວງພົ້ນທຸກທັງປວງໄດ້ແລ້ວ ປະຣິນິບພານແລ້ວ ເພິ່ງບັນຍັດດ້ວຍຈັກຂຸໃດ ຈັກຂຸນັ້ນມີຢູ່ບໍ? ຯລຯ ຊິວຫານັ້ນມີຢູ່ບໍ? ຯລຯ ບຸກຄົນເມື່ອຈະບັນຍັດພຣະພຸດທະເຈົ້າທັງຫຼາຍໃນອະດີດ ຜູ້ຕັດທຳເປັນເຄື່ອງລ້າຊ້າ ຜູ້ຕັດທາງ ໄດ້ແລ້ວ ຜູ້ຄອບງຳວັດຕະໄດ້ແລ້ວ ຜູ້ລ່ວງພົ້ນທຸກທັງປວງໄດ້ແລ້ວ ປະຣິນິບພານແລ້ວ ເພິ່ງບັນ ຍັດດ້ວຍມະໂນໃດ ມະໂນນັ້ນມີຢູ່ບໍ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ຜັກຄຸນະບຸກຄົນເມື່ອຈະບັນຍັດພຣະພຸດທະເຈົ້າ ທັງຫຼາຍ ໃນອະດີດ ຜູ້ຕັດທຳເປັນເຄື່ອງລ້າຊ້າ ຜູ້ຕັດທາງໄດ້ແລ້ວ ຜູ້ຄອບງຳວັດຕະໄດ້ແລ້ວ ຜູ້ ລ່ວງພົ້ນທຸກທັງປວງໄດ້ແລ້ວ ປະຣິນິບພານແລ້ວ ເພິ່ງບັນຍັດດ້ວຍຈັກຂຸໃດ ຈັກຂຸນັ້ນບໍ່ມີເລີຍ ຯລຯ ຊິວຫານັ້ນບໍ່ມີເລີຍ ຯລຯ ບຸກຄົນເມື່ອຈະບັນຍັດພຣະພຸດທະເຈົ້າທັງຫຼາຍໃນອະດີດ ຜູ້ຕັດ ທຳເປັນເຄື່ອງລ້າຊ້າ ຜູ້ຕັດທາງໄດ້ແລ້ວ ຜູ້ຄອບງຳວັດຕະໄດ້ແລ້ວ ຜູ້ລ່ວງພົ້ນທຸກ ທັງປວງໄດ້ ແລ້ວ ປະຣິນິບພານແລ້ວ ເພິ່ງບັນຍັດດ້ວຍມະໂນໃດ ມະໂນນັ້ນບໍ່ມີເລີຍ" ມີຢູ່ຈິງ ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ອະດີດມີຢູ່"

ສກ. ອະດີດມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ວ່າ "ທ່ານພຣະນັນທະກະໄດ້ກ່າວດັ່ງນີ້ວ່າ "ເມື່ອກ່ອນເຮົາມີໂລພະ ເລື້ອງນັ້ນເປັນສິ່ງບໍ່ດີ ບັດນີ້ໂລພະນັ້ນບໍ່ມີ ເລື້ອງນັ້ນເປັນສິ່ງທີ່ດີ ເມື່ອກ່ອນເຮົາມີໂທສະ ຯລຯ ເມື່ອກ່ອນເຮົາມີໂມຫະ ເລື້ອງນັ້ນເປັນສິ່ງບໍ່ດີ ບັດນີ້ໂມຫະນັ້ນບໍ່ມີ ເລື້ອງນັ້ນເປັນສິ່ງທີ່ດີ" ມີຢູ່ຈິງ ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ອະດີດມີຢູ່"

ປຣ. ທ່ານບໍ່ຍອມຮັບວ່າ "ອະນາຄົດມີຢູ່" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ຖ້າຣາຄະ (ຄວາມກຳ-ໜັດ) ນັນທິ (ຄວາມເພີດເພີນ) ຕັນຫາ (ຄວາມທະຍານຢາກ) ມີຢູ່ໃນກະວະລິງກາຣາຫານແລ້ວ ວິນຍານຈະຕັ້ງຢູ່ງອກງາມໃນກະວະລິງກາຣາຫານນັ້ນ ບ່ອນໃດວິນຍານຕັ້ງຢູ່ງອກງາມ ບ່ອນນັ້ນຍ່ອມມີນາມຮູບຢັ່ງລົງ ບ່ອນໃດມີນາມຮູບຢັ່ງລົງ ບ່ອນນັ້ນຍ່ອມມີຄວາມຈະເລີນແຫ່ງສັງຂານທັງຫຼາຍ ບ່ອນໃດມີຄວາມຈະເລີນແຫ່ງສັງຂານທັງຫຼາຍ ບ່ອນນັ້ນຍ່ອມມີການເກີດໃນພົບໃໝ່ຕໍ່ໄປ ບ່ອນໃດມີການເກີດໃນພົບໃໝ່ຕໍ່ໄປ ບ່ອນນັ້ນຍ່ອມມີຊາດ ຊະຣາ ແລະມໍຣະນະຕໍ່ໄປ ບ່ອນໃດມີຊາດຊະຣາ ແລະມໍຣະນະຕໍ່ໄປ ເຮົາກ່າວວ່າ "ບ່ອນນັ້ນມີຄວາມໂສກ ມີຄວາມກະວົນກະວາຍ ແລະມີຄວາມຄັບແຄ້ນ" ຖ້າຣາຄະ ນັນທິ ຕັນຫາມີຢູ່ໃນຜັດສາຫານ ຯລຯ ຖ້າຣາຄະ ນັນທິ ຕັນຫາມີຢູ່ໃນມະໂນສັນເຈຕະນາຫານ ຯລຯ ຖ້າຣາຄະ ນັນທິ ຕັນຫາມີຢູ່ໃນວິນຍານາຫານ ຯລຯ ເຮົາກ່າວວ່າ "ບ່ອນນັ້ນມີຄວາມໂສກ ມີຄວາມກະວົນກະວາຍ ແລະມີຄວາມຄັບແຄ້ນ" ມີຢູ່ຈິງແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ອະນາຄົດມີຢູ່"

ສກ. ອະນາຄົດມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ຖ້າຣາຄະ ນັນທິ ຕັນຫາບໍ່ມີໃນກະວະລິງກາຣາຫານ ວິນຍານຈະບໍ່ຕັ້ງຢູ່ງອກງາມໃນກະວະລິງກາຣາຫານນັ້ນ ບ່ອນໃດ ວິນຍານບໍ່ຕັ້ງຢູ່ງອກງາມ ບ່ອນນັ້ນຍ່ອມບໍ່ມີນາມຮູບຢັ່ງລົງ ບ່ອນໃດບໍ່ມີນາມຮູບຢັ່ງລົງ ບ່ອນນັ້ນຍ່ອມບໍ່ມີຄວາມຈະເລີນແຫ່ງສັງຂານທັງຫຼາຍ ບ່ອນໃດບໍ່ມີຄວາມຈະເລີນແຫ່ງສັງຂານທັງຫຼາຍ ບ່ອນນັ້ນຍ່ອມບໍ່ມີການເກີດໃນພົບໃໝ່ຕໍ່ໄປ ບ່ອນໃດບໍ່ມີການເກີດໃນພົບໃໝ່ຕໍ່ໄປ ບ່ອນນັ້ນຍ່ອມບໍ່ມີຊາດ ຊະຣາ ແລະມໍຣະນະຕໍ່ໄປ ບ່ອນໃດບໍ່ມີຊາດ ຊະຣາ ແລະມໍຣະນະຕໍ່ໄປ ເຮົາກ່າວວ່າ "ບ່ອນນັ້ນບໍ່ມີຄວາມໂສກ ບໍ່ມີຄວາມກະວົນກະວາຍ ແລະບໍ່ມີຄວາມຄັບແຄ້ນ ຖ້າຣາຄະ ນັນທິ ຕັນຫາບໍ່ມີໃນຜັດສາຫານ ຯລຯ ຖ້າຣາຄະ ນັນທິ ຕັນຫາບໍ່ມີໃນມະໂນສັນເຈຕະນາຫານ ຯລຯ ຖ້າຣາຄະ ນັນທິ ຕັນຫາບໍ່ມີໃນວິນຍານາຫານ ຯລຯ ເຮົາກ່າວວ່າ ບ່ອນນັ້ນບໍ່ມີຄວາມໂສກ ບໍ່ມີຄວາມກະວົນກະວາຍ ແລະບໍ່ມີຄວາມຄັບແຄ້ນ" ມີຢູ່ຈິງແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ອະນາຄົດມີຢູ່"

**ສັບພະມັດຖິກະຖາ ຈົບ**

## ໘. ອະຕີຕັກຂັນທາທິກະຖາ

## ວ່າດ້ວຍອະດີດຂັນ ເປັນຕົ້ນ

### ໑. ນະສຸດຕະສາທະນະ

### ວ່າດ້ວຍການບໍ່ອ້າງພຣະສູດ

[໔໘໗] ປຣ. ອະດີດເປັນຂັນແມ່ນບໍ?

ສກ. ແມ່ນ

ປຣ. ອະດີດມີຢູ່ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ອະດີດເປັນອາຍະຕະນະແມ່ນບໍ?

ສກ. ແມ່ນ

ປຣ. ອະດີດມີຢູ່ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ອະດີດເປັນທາດແມ່ນບໍ?

ສກ. ແມ່ນ

ປຣ. ອະດີດມີຢູ່ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ອະດີດເປັນຂັນ ເປັນທາດ ເປັນອາຍະຕະນະແມ່ນບໍ?

ສກ. ແມ່ນ

ປຣ. ອະດີດມີຢູ່ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ອະນາຄົດເປັນຂັນແມ່ນບໍ?

ສກ. ແມ່ນ

ປຣ. ອະນາຄົດມີຢູ່ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ອະນາຄົດເປັນອາຍະຕະນະແມ່ນບໍ?

ສກ. ແມ່ນ

ປຣ. ອະນາຄົດມີຢູ່ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ອະນາຄົດເປັນທາດແມ່ນບໍ?

ສກ. ແມ່ນ

ປຣ. ອະນາຄົດມີຢູ່ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ອະນາຄົດເປັນຂັນ ເປັນທາດ ເປັນອາຍະຕະນະແມ່ນບໍ?

ສກ. ແມ່ນ

ປຣ. ອະນາຄົດມີຢູ່ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ປັດຈຸບັນເປັນຂັນ ປັດຈຸບັນມີຢູ່ແມ່ນບໍ?

ສກ. ແມ່ນ

ປຣ. ອະດີດເປັນຂັນ ອະດີດມີຢູ່ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ປັດຈຸບັນເປັນອາຍະຕະນະ ປັດຈຸບັນມີຢູ່ແມ່ນບໍ?

ສກ. ແມ່ນ

ປຣ. ອະດີດເປັນອາຍະຕະນະ ອະດີດມີຢູ່ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ປັດຈຸບັນເປັນທາດ ປັດຈຸບັນມີຢູ່ແມ່ນບໍ?

ສກ. ແມ່ນ

ປຣ. ອະດີດເປັນທາດ ອະດີດມີຢູ່ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ປັດຈຸບັນເປັນຂັນ ເປັນທາດ ເປັນອາຍະຕະນະ ປັດຈຸບັນມີຢູ່ແມ່ນບໍ?

ສກ. ແມ່ນ

ປຣ. ອະດີດເປັນຂັນ ເປັນທາດ ເປັນອາຍະຕະນະ ອະດີດມີຢູ່ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ປັດຈຸບັນເປັນຂັນ ປັດຈຸບັນມີຢູ່ແມ່ນບໍ?

ສກ. ແມ່ນ

ປຣ. ອະນາຄົດເປັນຂັນ ອະນາຄົດມີຢູ່ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ປັດຈຸບັນເປັນອາຍະຕະນະ ປັດຈຸບັນມີຢູ່ແມ່ນບໍ?

ສກ. ແມ່ນ

ປຣ. ອະນາຄົດເປັນອາຍະຕະນະ ອະນາຄົດມີຢູ່ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ປັດຈຸບັນເປັນທາດ ປັດຈຸບັນມີຢູ່ແມ່ນບໍ?

ສກ. ແມ່ນ

ປຣ. ອະນາຄົດເປັນທາດ ອະນາຄົດມີຢູ່ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ປັດຈຸບັນເປັນຂັນ ເປັນທາດ ເປັນອາຍະຕະນະ ປັດຈຸບັນມີຢູ່ແມ່ນບໍ?

ສກ. ແມ່ນ

ປຣ. ອະນາຄົດເປັນຂັນ ເປັນທາດ ເປັນອາຍະຕະນະ ອະນາຄົດມີຢູ່ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ອະດີດເປັນຂັນ ອະດີດບໍ່ມີແມ່ນບໍ?

ສກ. ແມ່ນ

ປຣ. ປັດຈຸບັນເປັນຂັນ ປັດຈຸບັນບໍ່ມີແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ອະດີດເປັນອາຍະຕະນະ ອະດີດບໍ່ມີແມ່ນບໍ?

ສກ. ແມ່ນ

ປຣ. ປັດຈຸບັນເປັນອາຍະຕະນະ ປັດຈຸບັນບໍ່ມີແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ອະດີດເປັນທາດ ອະດີດບໍ່ມີແມ່ນບໍ?

ສກ. ແມ່ນ

ປຣ. ປັດຈຸບັນເປັນທາດ ປັດຈຸບັນບໍ່ມີແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ອະດີດເປັນຂັນ ເປັນທາດ ເປັນອາຍະຕະນະ ອະດີດບໍ່ມີແມ່ນບໍ?

ສກ. ແມ່ນ

ປຣ. ປັດຈຸບັນເປັນຂັນ ເປັນທາດ ເປັນອາຍະຕະນະ ປັດຈຸບັນບໍ່ມີແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ອະນາຄົດເປັນຂັນ ອະນາຄົດບໍ່ມີແມ່ນບໍ?

ສກ. ແມ່ນ

ປຣ. ປັດຈຸບັນເປັນຂັນ ປັດຈຸບັນບໍ່ມີແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ອະນາຄົດເປັນອາຍະຕະນະ ຯລຯ ອະນາຄົດເປັນທາດ ຯລຯ ອະນາຄົດເປັນຂັນ ເປັນທາດ ເປັນອາຍະຕະນະ ອະນາຄົດບໍ່ມີແມ່ນບໍ?

ສກ. ແມ່ນ

ປຣ. ປັດຈຸບັນເປັນຂັນ ເປັນທາດ ເປັນອາຍະຕະນະ ປັດຈຸບັນບໍ່ມີແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ฯลฯ

ປຣ. ຮູບທີ່ເປັນອະດີດເປັນຂັນແມ່ນບໍ?

ສກ. ແມ່ນ

ປຣ. ຮູບທີ່ເປັນອະດີດມີຢູ່ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ฯลฯ

ປຣ. ຮູບທີ່ເປັນອະດີດເປັນອາຍະຕະນະແມ່ນບໍ?

ສກ. ແມ່ນ

ປຣ. ຮູບທີ່ເປັນອະດີດມີຢູ່ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ฯลฯ

ປຣ. ຮູບທີ່ເປັນອະດີດເປັນທາດແມ່ນບໍ?

ສກ. ແມ່ນ

ປຣ. ຮູບທີ່ເປັນອະດີດມີຢູ່ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ฯลฯ

ປຣ. ຮູບທີ່ເປັນອະດີດເປັນຂັນ ເປັນທາດ ເປັນອາຍະຕະນະແມ່ນບໍ?

ສກ. ແມ່ນ

ປຣ. ຮູບທີ່ເປັນອະດີດມີຢູ່ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ฯลฯ

ປຣ. ຮູບທີ່ເປັນອະນາຄົດເປັນຂັນແມ່ນບໍ?

ສກ. ແມ່ນ

ປຣ. ຮູບທີ່ເປັນອະນາຄົດມີຢູ່ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ฯลฯ

ປຣ. ຮູບທີ່ເປັນອະນາຄົດເປັນອາຍະຕະນະ ฯลฯ ຮູບທີ່ເປັນອະນາຄົດເປັນທາດ ฯลฯ ຮູບທີ່ເປັນອະນາຄົດເປັນຂັນ ເປັນທາດ ເປັນອາຍະຕະນະແມ່ນບໍ?

ສກ. ແມ່ນ

ປຣ. ຮູບທີ່ເປັນອະນາຄົດມີຢູ່ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ฯลฯ

ປຣ. ຮູບທີ່ເປັນປັດຈຸບັນເປັນຂັນ ຮູບທີ່ເປັນປັດຈຸບັນມີຢູ່ແມ່ນບໍ?

ສກ. ແມ່ນ

ປຣ. ຮູບທີ່ເປັນອະດີດເປັນຂັນ ຮູບທີ່ເປັນອະດີດມີຢູ່ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ຮູບທີ່ເປັນປັດຈຸບັນເປັນອາຍະຕະນະ ຯລຯ ຮູບທີ່ເປັນປັດຈຸບັນເປັນທາດ ຯລຯ ຮູບທີ່ເປັນປັດຈຸບັນເປັນຂັນ ເປັນທາດ ເປັນອາຍະຕະນະ ຮູບທີ່ເປັນປັດຈຸບັນມີຢູ່ແມ່ນບໍ?

ສກ. ແມ່ນ

ປຣ. ຮູບທີ່ເປັນອະດີດເປັນຂັນ ເປັນທາດ ເປັນອາຍະຕະນະ ຮູບທີ່ເປັນອະດີດມີຢູ່ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ຮູບທີ່ເປັນປັດຈຸບັນເປັນຂັນ ຮູບທີ່ເປັນປັດຈຸບັນມີຢູ່ແມ່ນບໍ?

ສກ. ແມ່ນ

ປຣ. ຮູບທີ່ເປັນອະນາຄົດເປັນຂັນ ຮູບທີ່ເປັນອະນາຄົດມີຢູ່ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ຮູບທີ່ເປັນປັດຈຸບັນເປັນອາຍະຕະນະ ຯລຯ ຮູບທີ່ເປັນປັດຈຸບັນເປັນທາດ ຯລຯ ຮູບທີ່ເປັນປັດຈຸບັນເປັນຂັນ ເປັນທາດ ເປັນອາຍະຕະນະ ຮູບທີ່ເປັນປັດຈຸບັນມີຢູ່ແມ່ນບໍ?

ສກ. ແມ່ນ

ປຣ. ຮູບທີ່ເປັນອະນາຄົດເປັນຂັນ ເປັນທາດ ເປັນອາຍະຕະນະ ຮູບທີ່ເປັນອະນາຄົດມີຢູ່ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ຮູບທີ່ເປັນອະດີດເປັນຂັນ ຮູບທີ່ເປັນອະດີດບໍ່ມີແມ່ນບໍ?

ສກ. ແມ່ນ

ປຣ. ຮູບທີ່ເປັນປັດຈຸບັນເປັນຂັນ ຮູບທີ່ເປັນປັດຈຸບັນບໍ່ມີແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ຮູບທີ່ເປັນອະດີດເປັນອາຍະຕະນະ ຯລຯ ຮູບທີ່ເປັນອະດີດເປັນທາດ ຯລຯ ຮູບທີ່ເປັນອະດີດເປັນຂັນ ເປັນທາດ ເປັນອາຍະຕະນະ ຮູບທີ່ເປັນອະດີດບໍ່ມີແມ່ນບໍ?

ສກ. ແມ່ນ

ປຣ. ຮູບທີ່ເປັນປັດຈຸບັນເປັນຂັນ ເປັນທາດ ເປັນອາຍະຕະນະ ຮູບທີ່ເປັນປັດຈຸບັນບໍ່ມີແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ຮູບທີ່ເປັນອະນາຄົດເປັນຂັນ ຮູບທີ່ເປັນອະນາຄົດບໍ່ມີແມ່ນບໍ?

ສກ. ແມ່ນ

ປຣ. ຮູບທີ່ເປັນປັດຈຸບັນເປັນຂັນ ຮູບທີ່ເປັນປັດຈຸບັນບໍ່ມີແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ຮູບທີ່ເປັນອະນາຄົດເປັນອາຍະຕະນະ ຯລຯ ຮູບທີ່ເປັນອະນາຄົດເປັນທາດ ຯລຯ ຮູບທີ່ເປັນອະນາຄົດເປັນຂັນ ເປັນທາດ ເປັນອາຍະຕະນະ ຮູບທີ່ເປັນອະນາຄົດບໍ່ມີແມ່ນບໍ?

ສກ. ແມ່ນ

ປຣ. ຮູບທີ່ເປັນປັດຈຸບັນເປັນຂັນ ເປັນທາດ ເປັນອາຍະຕະນະ ຮູບທີ່ເປັນປັດຈຸບັນບໍ່ມີແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ເວທະນາທີ່ເປັນອະດີດ ຯລຯ ສັນຍາທີ່ເປັນອະດີດ ຯລຯ ສັງຂານທີ່ເປັນອະດີດ ຯລຯ ວິນຍານທີ່ເປັນອະດີດເປັນຂັນແມ່ນບໍ?

ສກ. ແມ່ນ

ປຣ. ວິນຍານທີ່ເປັນອະດີດມີຢູ່ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ວິນຍານທີ່ເປັນອະດີດເປັນອາຍະຕະນະ ຯລຯ ວິນຍານທີ່ເປັນອະດີດເປັນທາດ ຯລຯ ວິນຍານທີ່ເປັນອະດີດເປັນຂັນ ເປັນທາດ ເປັນອາຍະຕະນະ ແມ່ນບໍ?

ສກ. ແມ່ນ

ປຣ. ວິນຍານທີ່ເປັນອະດີດມີຢູ່ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ວິນຍານທີ່ເປັນອະນາຄົດເປັນຂັນແມ່ນບໍ?

ສກ. ແມ່ນ

ປຣ. ວິນຍານທີ່ເປັນອະນາຄົດມີຢູ່ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ວິນຍານທີ່ເປັນອະນາຄົດເປັນອາຍະຕະນະ ຯລຯ ວິນຍານທີ່ເປັນອະນາຄົດເປັນທາດ ຯລຯ ວິນຍານທີ່ເປັນອະນາຄົດເປັນຂັນ ເປັນທາດ ເປັນອາຍະຕະນະແມ່ນບໍ?

ສກ. ແມ່ນ

ປຣ. ວິນຍານທີ່ເປັນອະນາຄົດມີຢູ່ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ວິນຍານທີ່ເປັນປັດຈຸບັນເປັນຂັນ ວິນຍານທີ່ເປັນປັດຈຸບັນມີຢູ່ແມ່ນບໍ?

ສກ. ແມ່ນ

ປຣ. ວິນຍານທີ່ເປັນອະດີດເປັນຂັນ ວິນຍານທີ່ເປັນອະດີດມີຢູ່ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ວິນຍານທີ່ເປັນປັດຈຸບັນເປັນອາຍະຕະນະ ຯລຯ ວິນຍານທີ່ເປັນປັດຈຸບັນເປັນທາດ ຯລຯ ວິນຍານທີ່ເປັນປັດຈຸບັນເປັນຂັນ ເປັນທາດ ເປັນອາຍະຕະນະ ວິນຍານທີ່ເປັນ ປັດຈຸບັນມີຢູ່ແມ່ນບໍ?

ສກ. ແມ່ນ

ປຣ. ວິນຍານທີ່ເປັນອະດີດເປັນຂັນ ເປັນທາດ ເປັນອາຍະຕະນະ ວິນຍານທີ່ເປັນອະດີດມີຢູ່ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ວິນຍານທີ່ເປັນປັດຈຸບັນເປັນຂັນ ວິນຍານທີ່ເປັນປັດຈຸບັນມີຢູ່ແມ່ນບໍ?

ສກ. ແມ່ນ

ປຣ. ວິນຍານທີ່ເປັນອະນາຄົດເປັນຂັນ ວິນຍານທີ່ເປັນອະນາຄົດມີຢູ່ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ວິນຍານທີ່ເປັນປັດຈຸບັນເປັນອາຍະຕະນະ ຯລຯ ວິນຍານທີ່ເປັນປັດຈຸບັນເປັນທາດ ຯລຯ ວິນຍານທີ່ເປັນປັດຈຸບັນເປັນຂັນ ເປັນທາດ ເປັນອາຍະຕະນະ ວິນຍານທີ່ເປັນປັດຈຸບັນມີຢູ່ແມ່ນບໍ?

ສກ. ແມ່ນ

ປຣ. ວິນຍານທີ່ເປັນອະນາຄົດເປັນຂັນ ເປັນທາດ ເປັນອາຍະຕະນະ ວິນຍານທີ່ເປັນອະນາຄົດມີຢູ່ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ວິນຍານທີ່ເປັນອະດີດເປັນຂັນ ວິນຍານທີ່ເປັນອະດີດບໍ່ມີແມ່ນບໍ?

ສກ. ແມ່ນ

ປຣ. ວິນຍານທີ່ເປັນປັດຈຸບັນເປັນຂັນ ວິນຍານທີ່ເປັນປັດຈຸບັນບໍ່ມີແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ວິນຍານທີ່ເປັນອະດີດເປັນອາຍະຕະນະ ຯລຯ ວິນຍານທີ່ເປັນອະດີດເປັນທາດ ຯລຯ ວິນຍານທີ່ເປັນອະດີດເປັນຂັນ ເປັນທາດ ເປັນອາຍະຕະນະວິນຍານທີ່ເປັນອະດີດບໍ່ມີແມ່ນບໍ?

ສກ. ແມ່ນ

ປຣ. ວິນຍານທີ່ເປັນປັດຈຸບັນເປັນຂັນ ເປັນທາດ ເປັນອາຍະຕະນະ ວິນຍານທີ່ເປັນປັດຈຸບັນບໍ່ມີແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ວິນຍານທີ່ເປັນອະນາຄົດເປັນຂັນ ວິນຍານທີ່ເປັນອະນາຄົດບໍ່ມີແມ່ນບໍ?

ສກ. ແມ່ນ

ປຣ. ວິນຍານທີ່ເປັນປັດຈຸບັນເປັນຂັນ ວິນຍານທີ່ເປັນປັດຈຸບັນບໍ່ມີແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ໆລໆ

ປຣ. ວິນຍານທີ່ເປັນອະນາຄົດເປັນອາຍະຕະນະ ໆລໆ ວິນຍານທີ່ເປັນອະນາຄົດເປັນທາດ ໆລໆ ວິນຍານທີ່ເປັນອະນາຄົດເປັນຂັນ ເປັນທາດ ເປັນອາຍະຕະນະວິນຍານທີ່ເປັນອະນາຄົດບໍ່ມີແມ່ນບໍ?

ສກ. ແມ່ນ

ປຣ. ວິນຍານທີ່ເປັນປັດຈຸບັນເປັນຂັນ ເປັນທາດ ເປັນອາຍະຕະນະ ວິນຍານທີ່ເປັນປັດຈຸບັນບໍ່ມີແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ໆລໆ

## ໘. ສຸດຕະສາທະນະ

## ວ່າດ້ວຍການອ້າງພຣະສູດ

[໘໙] ສກ. ທ່ານບໍ່ຍອມຮັບວ່າ "ຂັນ ທາດ ອາຍະຕະນະ ທັງທີ່ເປັນອະດີດແລະອະນາຄົດເຫຼົ່ານີ້ບໍ່ມີ" ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ຫຼັກການ ໓ ປະການນີ້ ຄື (໑) ຫຼັກພາສາ (໒) ຫຼັກການຕັ້ງຊື່ (໓) ຫຼັກການບັນຍັດ ໆລໆ ບໍ່ຖືກສະມະນະພາມຜູ້ຮູ້ຄັດຄ້ານ ໆລໆ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ຂັນ ທາດ ອາຍະຕະນະ ທັງທີ່ເປັນອະດີດ ແລະ ອະນາຄົດເຫຼົ່ານີ້ບໍ່ມີ"

ປຣ. ຂັນ ທາດ ອາຍະຕະນະ ທັງທີ່ເປັນອະດີດແລະອະນາຄົດເຫຼົ່ານີ້ບໍ່ມີແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ຮູບທັງໝົດ ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ໆລໆ ນີ້ຮຽກວ່າ ຮູບຂັນ ເວທະນາ ໆລໆ ສັນຍາ ໆລໆ ສັງຂານ ໆລໆ ວິນຍານທັງໝົດ ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ນີ້ຮຽກວ່າ ວິນຍານຂັນ" ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ຂັນ ທາດ ອາຍະຕະນະ ທັງທີ່ເປັນອະດີດແລະອະນາຄົດເຫຼົ່ານີ້ບໍ່ມີຢູ່"

**ອະຕີຕັກຂັນທາທິກະຖາ ຈົບ**

# ໗. ເອກັດຈະມັດຖິຕິກະຖາ

## ວ່າດ້ວຍບາງຢ່າງມີຢູ່

## ໑. ອະຕີຕາທິເອກັດຈະກະຖາ

## ວ່າດ້ວຍສະພາວະທຳບາງຢ່າງທີ່ເປັນອະດີດ ເປັນຕົ້ນ

[໔໙໙] ສກ. ສະພາວະທຳທີ່ເປັນອະດີດມີຢູ່ແມ່ນບໍ?

ປຣ. ສະພາວະທຳທີ່ເປັນອະດີດບາງຢ່າງມີຢູ່ ບາງຢ່າງບໍ່ມີ

ສກ. ສະພາວະທຳທີ່ເປັນອະດີດບາງຢ່າງດັບໄປແລ້ວ ບາງຢ່າງຍັງບໍ່ດັບໄປ ບາງຢ່າງຫາຍໄປແລ້ວ ບາງຢ່າງຍັງບໍ່ຫາຍໄປ ບາງຢ່າງສູນໄປແລ້ວ ບາງຢ່າງຍັງບໍ່ສູນໄປ ບາງຢ່າງດັບສູນໄປແລ້ວ ບາງຢ່າງຍັງບໍ່ດັບສູນໄປແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ເປັນອະດີດບາງຢ່າງມີຢູ່ ບາງຢ່າງບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ເປັນອະດີດທີ່ຍັງບໍ່ໃຫ້ຜົນ ບາງເຫຼົ່າມີຢູ່ ບາງເຫຼົ່າບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ເປັນອະດີດບາງຢ່າງມີຢູ່ ບາງຢ່າງບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ເປັນອະດີດທີ່ໃຫ້ຜົນແລ້ວ ບາງເຫຼົ່າມີຢູ່ ບາງເຫຼົ່າບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ເປັນອະດີດບາງຢ່າງມີຢູ່ ບາງຢ່າງບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ເປັນອະດີດທີ່ບໍ່ມີວິບາກ ບາງເຫຼົ່າມີຢູ່ ບາງເຫຼົ່າບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ເປັນອະດີດບາງຢ່າງມີຢູ່ ບາງຢ່າງບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳສິ່ງໃດມີຢູ່ ສະພາວະທຳສິ່ງໃດບໍ່ມີຢູ່

ປຣ. ສະພາວະທຳທີ່ເປັນອະດີດທີ່ຍັງບໍ່ໃຫ້ຜົນເຫຼົ່ານັ້ນມີຢູ່ ສະພາວະທຳທີ່ເປັນອະດີດທີ່ໃຫ້ຜົນແລ້ວເຫຼົ່ານັ້ນບໍ່ມີຢູ່

ສກ. ສະພາວະທຳທີ່ເປັນອະດີດທີ່ຍັງບໍ່ໃຫ້ຜົນເຫຼົ່ານັ້ນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ເປັນອະດີດທີ່ໃຫ້ຜົນແລ້ວເຫຼົ່ານັ້ນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ເປັນອະດີດທີ່ຍັງບໍ່ໃຫ້ຜົນເຫຼົ່ານັ້ນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ເປັນອະດີດທີ່ບໍ່ມີຜົນເຫຼົ່ານັ້ນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ເປັນອະດີດທີ່ໃຫ້ຜົນແລ້ວເຫຼົ່ານັ້ນບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ເປັນອະດີດທີ່ຍັງບໍ່ໃຫ້ຜົນເຫຼົ່ານັ້ນບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ເປັນອະດີດທີ່ໃຫ້ຜົນແລ້ວເຫຼົ່ານັ້ນບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ເປັນອະດີດທີ່ບໍ່ມີຜົນເຫຼົ່ານັ້ນບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ເປັນອະດີດທີ່ຍັງບໍ່ໃຫ້ຜົນເຫຼົ່ານັ້ນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ເປັນອະດີດທີ່ຍັງບໍ່ໃຫ້ຜົນດັບໄປແລ້ວບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກສະພາວະທຳທີ່ເປັນອະດີດທີ່ຍັງບໍ່ໃຫ້ຜົນດັບໄປແລ້ວ ທ່ານກໍບໍ່ຄວນຍອມຮັບວ່າ "ສະພາວະທຳທີ່ເປັນອະດີດທີ່ຍັງບໍ່ໃຫ້ຜົນດັບໄປແລ້ວເຫຼົ່ານັ້ນມີຢູ່"

ສກ. ສະພາວະທຳທີ່ເປັນອະດີດທີ່ຍັງບໍ່ໃຫ້ຜົນດັບໄປແລ້ວເຫຼົ່ານັ້ນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ເປັນອະດີດທີ່ໃຫ້ຜົນດັບໄປແລ້ວເຫຼົ່ານັ້ນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ເປັນອະດີດທີ່ຍັງບໍ່ໃຫ້ຜົນດັບໄປແລ້ວເຫຼົ່ານັ້ນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ເປັນອະດີດທີ່ບໍ່ມີຜົນດັບໄປແລ້ວເຫຼົ່ານັ້ນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ເປັນອະດີດທີ່ໃຫ້ຜົນດັບໄປແລ້ວເຫຼົ່ານັ້ນບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ເປັນອະດີດທີ່ຍັງບໍ່ໃຫ້ຜົນດັບໄປແລ້ວເຫຼົ່ານັ້ນບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ສະພາວະທຳທີ່ເປັນອະດີດທີ່ໃຫ້ຜົນດັບໄປແລ້ວເຫຼົ່ານັ້ນບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ເປັນອະດີດທີ່ບໍ່ມີຜົນດັບໄປແລ້ວເຫຼົ່ານັ້ນບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ສະພາວະທຳທີ່ເປັນອະດີດທີ່ຍັງບໍ່ໃຫ້ຜົນດັບໄປແລ້ວເຫຼົ່ານັ້ນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ເປັນອະດີດທີ່ໃຫ້ຜົນດັບໄປແລ້ວເຫຼົ່ານັ້ນບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ເປັນອະດີດ ສ່ວນໜຶ່ງໃຫ້ຜົນແລ້ວ ອີກສ່ວນໜຶ່ງຍັງບໍ່ໃຫ້ຜົນດັບໄປແລ້ວເຫຼົ່ານັ້ນ ບາງເຫຼົ່າມີຢູ່ ບາງເຫຼົ່າບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ປຣ. ທ່ານບໍ່ຍອມຮັບວ່າ "ສະພາວະທຳທີ່ເປັນອະດີດທີ່ຍັງບໍ່ໃຫ້ຜົນເຫຼົ່ານັ້ນມີຢູ່" ແມ່ນບໍ?

ສກ. ແມ່ນ

ປຣ. ສະພາວະທຳທີ່ເປັນອະດີດທີ່ຍັງບໍ່ໃຫ້ຜົນກໍຈັກໃຫ້ຜົນບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກສະພາວະທຳທີ່ເປັນອະດີດທີ່ຍັງບໍ່ໃຫ້ຜົນກໍຈັກໃຫ້ຜົນ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ສະພາວະທຳທີ່ເປັນອະດີດທີ່ຍັງບໍ່ໃຫ້ຜົນເຫຼົ່ານັ້ນມີຢູ່"

ສກ. ຍ້ອນທ່ານເຂົ້າໃຈວ່າ "ສະພາວະທຳທີ່ເປັນອະດີດທີ່ຍັງບໍ່ໃຫ້ຜົນຈັກໃຫ້ຜົນ" ຈຶ່ງຍອມຮັບວ່າ "ສະພາວະທຳເຫຼົ່ານັ້ນມີຢູ່" ແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນທ່ານເຂົ້າໃຈວ່າ "ສະພາວະທຳທີ່ເປັນອະດີດທີ່ຍັງບໍ່ໃຫ້ຜົນຈັກໃຫ້ຜົນ" ຈຶ່ງຍອມຮັບວ່າ "ສະພາວະທຳເຫຼົ່ານັ້ນເປັນປັດຈຸບັນ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ຍ້ອນທ່ານເຂົ້າໃຈວ່າ "ສະພາວະທຳທີ່ເປັນອະດີດທີ່ຍັງບໍ່ໃຫ້ຜົນຈັກໃຫ້ຜົນ" ຈຶ່ງຍອມຮັບວ່າ "ສະພາວະທຳເຫຼົ່ານັ້ນເປັນປັດຈຸບັນ" ແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນທ່ານເຂົ້າໃຈວ່າ "ສະພາວະທຳທີ່ເປັນປັດຈຸບັນຈັກດັບ" ຈຶ່ງຍອມຮັບວ່າ "ສະພາວະທຳເຫຼົ່ານັ້ນບໍ່ມີ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

## ໘. ອະນາຄະຕາທິເອກັດຈະກະຖາ

## ວ່າດ້ວຍສະພາວະທຳບາງຢ່າງທີ່ເປັນອະນາຄົດ ເປັນຕົ້ນ

[໑໐໐] ສກ. ສະພາວະທຳທີ່ເປັນອະນາຄົດມີຢູ່ແມ່ນບໍ?

ປຣ. ບາງຢ່າງມີຢູ່ ບາງຢ່າງບໍ່ມີ

ສກ. ສະພາວະທຳທີ່ເປັນອະນາຄົດບາງຢ່າງເກີດ ບາງຢ່າງບໍ່ເກີດ ບາງຢ່າງເກີດຢ່າງດີ ບາງຢ່າງບໍ່ເກີດຢ່າງດີ ບາງຢ່າງບັງເກີດ ບາງຢ່າງບໍ່ບັງເກີດ ບາງຢ່າງຜາກົດ ບາງຢ່າງບໍ່ຜາກົດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ເປັນອະນາຄົດ ບາງຢ່າງມີຢູ່ ບາງຢ່າງບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ເປັນອະນາຄົດເຊິ່ງຈັກເກີດຂຶ້ນ ບາງເຫຼົ່າມີຢູ່ ບາງເຫຼົ່າບໍ່ມີ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ເປັນອະນາຄົດ ບາງຢ່າງມີຢູ່ ບາງຢ່າງບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ເປັນອະນາຄົດເຊິ່ງຈັກບໍ່ເກີດຂຶ້ນ ບາງເຫຼົ່າມີຢູ່ ບາງເຫຼົ່າບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ເປັນອະນາຄົດ ບາງຢ່າງມີຢູ່ ບາງຢ່າງບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳສິ່ງໃດມີຢູ່ ສະພາວະທຳສິ່ງໃດບໍ່ມີ

ປຣ. ສະພາວະທຳທີ່ເປັນອະນາຄົດເຊິ່ງຈັກເກີດຂຶ້ນເຫຼົ່ານັ້ນມີຢູ່ ສະພາວະທຳທີ່ເປັນອະນາຄົດທີ່ຈັກບໍ່ເກີດຂຶ້ນເຫຼົ່ານັ້ນບໍ່ມີ

ສກ. ສະພາວະທຳທີ່ເປັນອະນາຄົດເຊິ່ງຈັກເກີດຂຶ້ນເຫຼົ່ານັ້ນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ເປັນອະນາຄົດເຊິ່ງຈັກບໍ່ເກີດຂຶ້ນເຫຼົ່ານັ້ນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ເປັນອະນາຄົດເຊິ່ງຈັກບໍ່ເກີດຂຶ້ນເຫຼົ່ານັ້ນບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ເປັນອະນາຄົດເຊິ່ງຈັກເກີດຂຶ້ນເຫຼົ່ານັ້ນບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ເປັນອະນາຄົດເຊິ່ງຈັກເກີດຂຶ້ນເຫຼົ່ານັ້ນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ເປັນອະນາຄົດເຊິ່ງຈັກເກີດຂຶ້ນຍັງບໍ່ເກີດແມ່ນບໍ?

ປຣ. ແມ່ນ

ສກ. ຫາກສະພາວະທຳທີ່ເປັນອະນາຄົດເຊິ່ງຈັກເກີດຂຶ້ນ ຍັງບໍ່ເກີດ ທ່ານກໍບໍ່ຄວນຍອມຮັບວ່າ "ສະພາວະທຳທີ່ເປັນອະນາຄົດເຊິ່ງຈັກເກີດຂຶ້ນເຫຼົ່ານັ້ນມີຢູ່"

ສກ. ສະພາວະທຳທີ່ເປັນອະນາຄົດເຊິ່ງຈັກເກີດຂຶ້ນແຕ່ຍັງບໍ່ເກີດເຫຼົ່ານັ້ນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ເປັນອະນາຄົດເຊິ່ງຈັກບໍ່ເກີດຂຶ້ນ ແລະຍັງບໍ່ເກີດເຫຼົ່ານັ້ນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ເປັນອະນາຄົດເຊິ່ງຈັກບໍ່ເກີດຂຶ້ນ ແລະຍັງບໍ່ເກີດເຫຼົ່ານັ້ນບໍ່ມີ ແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ເປັນອະນາຄົດເຊິ່ງຈັກເກີດຂຶ້ນ ແຕ່ຍັງບໍ່ເກີດເຫຼົ່ານັ້ນບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ທ່ານບໍ່ຍອມຮັບວ່າ "ສະພາວະທຳທີ່ເປັນອະນາຄົດເຊິ່ງຈັກເກີດຂຶ້ນເຫຼົ່ານັ້ນມີຢູ່" ແມ່ນບໍ?

ສກ. ແມ່ນ

ປຣ. ສະພາວະທຳທີ່ເປັນອະນາຄົດເຊິ່ງຈັກເກີດຂຶ້ນ ຈັກເກີດຂຶ້ນບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກສະພາວະທຳທີ່ເປັນອະນາຄົດເຊິ່ງຈັກເກີດຂຶ້ນ ຈັກເກີດຂຶ້ນ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ສະພາວະທຳທີ່ເປັນອະນາຄົດເຊິ່ງຈັກເກີດຂຶ້ນເຫຼົ່ານັ້ນມີຢູ່"

ສກ. ຍ້ອນທ່ານເຂົ້າໃຈວ່າ "ສະພາວະທຳທີ່ເປັນອະນາຄົດເຊິ່ງຈັກເກີດຂຶ້ນ ຈັກເກີດຂຶ້ນ" ຈຶ່ງຍອມຮັບວ່າ "ສະພາວະທຳທີ່ເປັນອະນາຄົດເຊິ່ງຈັກເກີດຂຶ້ນແນ່ນອນມີຢູ່" ແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນທ່ານເຂົ້າໃຈວ່າ "ສະພາວະທຳທີ່ເປັນອະນາຄົດເຊິ່ງຈັກເກີດຂຶ້ນ ຈັກເກີດຂຶ້ນ" ຈຶ່ງຍອມຮັບວ່າ "ສະພາວະທຳທີ່ເປັນອະນາຄົດເຊິ່ງຈັກເກີດຂຶ້ນແນ່ນອນເປັນປັດຈຸບັນ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຍ້ອນທ່ານເຂົ້າໃຈວ່າ "ສະພາວະທຳທີ່ເປັນອະນາຄົດເຊິ່ງຈັກເກີດຂຶ້ນ ຈັກເກີດຂຶ້ນ" ຈຶ່ງຍອມຮັບວ່າ "ສະພາວະທຳທີ່ເປັນອະນາຄົດເຊິ່ງຈັກເກີດຂຶ້ນແນ່ນອນເປັນປັດຈຸບັນ" ແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນທ່ານເຂົ້າໃຈວ່າ "ສະພາວະທຳທີ່ເປັນປັດຈຸບັນຈັກດັບ" ຈຶ່ງຍອມຮັບວ່າ "ສະພາວະທຳທີ່ປັດຈຸບັນເຫຼົ່ານັ້ນບໍ່ມີ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

**ເອກັດຈະມັດຖິຕິກະຖາ ຈົບ**

## ໗. ສະຕິປັດຖານະກະຖາ
## ວ່າດ້ວຍສະຕິປັດຖານ

[໓໐໑] ສກ. ສະພາວະທຳທັງປວງເປັນສະຕິປັດຖານແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທັງປວງເປັນສະຕິ ເປັນສະຕິນຊີ ເປັນສະຕິພະລະ ເປັນສຳມາສະຕິ ເປັນສະຕິສຳໂພດຊົງ ເປັນທາງດຽວ ເປັນເຫດໃຫ້ເຖິງຄວາມສິ້ນກິເລດ ໃຫ້ເຖິງຄວາມຕັດສະຣູ້ ໃຫ້ເຖິງນິບພານ ບໍ່ເປັນອາລົມຂອງອາສະວະ ບໍ່ເປັນອາລົມຂອງສັງໂຍດ ບໍ່ເປັນອາລົມຂອງຄັນຖະ ບໍ່ເປັນອາລົມຂອງໂອຄະ ບໍ່ເປັນອາລົມຂອງໂຍຄະ ບໍ່ເປັນອາລົມຂອງນິວອນ ບໍ່ເປັນອາລົມຂອງປະຣາມາດ ບໍ່ເປັນອາລົມຂອງອຸປາທານ ບໍ່ເປັນອາລົມຂອງກິເລດ ສະພາວະທຳທັງປວງເປັນພຸດທານຸດສະຕິ ທຳມານຸດສະຕິ ສັງຄານຸດສະຕິ ສີລານຸດສະຕິ ຈາຄານຸດສະຕິ ເທວະຕານຸດສະຕິ ອານາປານະສະຕິ ມະຣະນານຸດສະຕິ ກາຍະຄະຕາສະຕິ ອຸປະສະມານຸດສະຕິແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທັງປວງເປັນສະຕິປັດຖານແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂາຍະຕະນະເປັນສະຕິປັດຖານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈັກຂາຍະຕະນະເປັນສະຕິປັດຖານແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂາຍະຕະນະເປັນສະຕິ ເປັນສະຕິນຊີ ເປັນສະຕິພະລະ ເປັນສຳມາສະຕິ ເປັນສະຕິສຳໂພດຊົງ ເປັນທາງດຽວ ເປັນເຫດໃຫ້ເຖິງຄວາມສິ້ນກິເລດ ໃຫ້ເຖິງຄວາມຕັດສະຣູ້ ໃຫ້ເຖິງນິບພານ ບໍ່ເປັນອາລົມຂອງອາສະວະ ບໍ່ເປັນອາລົມຂອງສັງໂຍດ ຯລຯ ບໍ່ເປັນອາລົມຂອງສັງກິເລດ ຈັກຂາຍະຕະນະ ເປັນພຸດທານຸດສະຕິ ທຳມານຸດສະຕິ ສັງຄານຸດສະຕິ ສີລານຸດສະຕິ ຈາຄານຸດສະຕິ ເທວະຕານຸດສະຕິ ອານາປານະສະຕິ ມະຣະນານຸດສະຕິ ກາຍະຄະຕາສະຕິ ອຸປະສະມານຸດສະຕິແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂສຕາຍະຕະນະ ຯລຯ ຄານາຍະຕະນະ ຯລຯ ຊິວຫາຍະຕະນະ ຯລຯ ກາຍາຍະຕະນະ ຯລຯ ຣູປາຍະຕະນະ ຯລຯ ສັດທາຍະຕະນະ ຯລຯ ຄັນທາຍະຕະນະ ຯລຯ ຣະສາຍະຕະນະ ຯລຯ ໂຜດຖັບພາຍະຕະນະ ຯລຯ ຣາຄະ ຯລຯ ໂທສະ ຯລຯ ໂມຫະ ຯລຯ ມານະ ຯລຯ ທິດຖິ ຯລຯ ວິຈິກິດສາ ຯລຯ ຖີນະ ຯລຯ ອຸດທັດຈະ ຯລຯ ອະຫິຣິກະ ຯລຯ ອະໂນດຕັບປະ ເປັນສະຕິປັດຖານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະໂນດຕັບປະເປັນສະຕິປັດຖານແມ່ນບໍ?

ປຣ. ແມ່ນ

ສກ. ອະໂນດຕັບປະເປັນສະຕິ ເປັນສະຕິນຊີ ເປັນສະຕິພະລະ ເປັນສຳມາສະຕິ ຯລຯ ເປັນກາຍະຄະຕາສະຕິ ເປັນອຸປະສະມານຸດສະຕິແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະຕິເປັນສະຕິປັດຖານ ແລະສະຕິທີ່ເປັນສະຕິປັດຖານນັ້ນເປັນສະຕິແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂາຍະຕະນະເປັນສະຕິປັດຖານ ແລະຈັກຂາຍະຕະນະທີ່ເປັນສະຕິປັດຖານນັ້ນເປັນສະຕິແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະຕິເປັນສະຕິປັດຖານ ແລະສະຕິທີ່ເປັນສະຕິປັດຖານນັ້ນເປັນສະຕິແມ່ນບໍ?

ປຣ. ແມ່ນ

ສກ. ໂສຕາຍະຕະນະ ຯລຯ ກາຍາຍະຕະນະ ຯລຯ ຣູປາຍະຕະນະ ຯລຯ ໂຜດຖັບພາຍະຕະນະ ຯລຯ ຣາຄະ ຯລຯ ໂທສະ ຯລຯ ໂມຫະ ຯລຯ ມານະ ຯລຯ ອະໂນດຕັບປະເປັນສະຕິປັດຖານ ແລະອະໂນດຕັບປະທີ່ເປັນສະຕິປັດຖານນັ້ນເປັນສະຕິແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈັກຂາຍະຕະນະເປັນສະຕິປັດຖານ ແຕ່ຈັກຂາຍະຕະນະທີ່ເປັນສະຕິປັດຖານນັ້ນບໍ່ເປັນສະຕິແມ່ນບໍ?

ປຣ. ແມ່ນ

ສກ. ສະຕິເປັນສະຕິປັດຖານ ແຕ່ສະຕິທີ່ເປັນສະຕິປັດຖານນັ້ນບໍ່ເປັນສະຕິແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂສຕາຍະຕະນະ ຯລຯ ກາຍາຍະຕະນະ ຯລຯ ຣູປາຍະຕະນະ ຯລຯ ໂຜດຖັບພາຍະຕະນະ ຯລຯ ຣາຄະ ຯລຯ ໂທສະ ຯລຯ ໂມຫະ ຯລຯ ອະໂນດຕັບປະເປັນສະຕິປັດຖານ ແຕ່ອະໂນດຕັບປະທີ່ເປັນສະຕິປັດຖານນັ້ນບໍ່ເປັນສະຕິແມ່ນບໍ?

ປຣ. ແມ່ນ

ສກ. ສະຕິເປັນສະຕິປັດຖານ ແຕ່ສະຕິທີ່ເປັນສະຕິປັດຖານນັ້ນບໍ່ເປັນສະຕິແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໓໐໔] ປຣ. ທ່ານບໍ່ຍອມຮັບວ່າ "ສະພາວະທຳທັງປວງເປັນສະຕິປັດຖານ" ແມ່ນບໍ?

ສກ. ແມ່ນ

ປຣ. ສະຕິອາອີບສະພາວະທຳທັງປວງຈຶ່ງຕັ້ງໝັ້ນໄດ້ບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກສະຕິອາອີບສະພາວະທຳທັງປວງຈຶ່ງຕັ້ງໝັ້ນໄດ້ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ສະພາວະທຳທັງປວງເປັນສະຕິປັດຖານ"

ສກ. ສະຕິອາອີບສະພາວະທຳທັງປວງຈຶ່ງຕັ້ງໝັ້ນໄດ້ ດັ່ງນັ້ນ ສະພາວະທຳທັງປວງຈຶ່ງເປັນສະຕິປັດຖານແມ່ນບໍ?

ປຣ. ແມ່ນ

ສກ. ຜັດສະອາອີບສະພາວະທຳທັງປວງຈຶ່ງຕັ້ງໝັ້ນໄດ້ ດັ່ງນັ້ນ ສະພາວະທຳທັງປວງຈຶ່ງເປັນຜັດສະປັດຖານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະຕິອາອີບສະພາວະທຳທັງປວງຈຶ່ງຕັ້ງໝັ້ນໄດ້ ດັ່ງນັ້ນ ສະພາວະທຳທັງປວງຈຶ່ງເປັນສະຕິປັດຖານແມ່ນບໍ?

ປຣ. ແມ່ນ

ສກ. ເວທະນາອາອີບສະພາວະທຳທັງປວງຈຶ່ງຕັ້ງໝັ້ນໄດ້ ຯລຯ ສັນຍາ ຯລຯ ເຈຕະນາ ຯລຯ ຈິດອາອີບສະພາວະທຳທັງປວງຈຶ່ງຕັ້ງໝັ້ນໄດ້ ຍ້ອນເຫດນັ້ນ ສະພາວະທຳທັງປວງຈຶ່ງເປັນຈິດຕະປັດຖານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທັງປວງເປັນສະຕິປັດຖານແມ່ນບໍ?

ປຣ. ແມ່ນ

ສກ. ສັດທັງປວງມີສະຕິຕັ້ງໝັ້ນ ປະກອບດ້ວຍສະຕິ ໝັ້ນຄົງດ້ວຍສະຕິ ສະຕິອາກົດແກ່ສັດທັງປວງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໓໐໕] ສກ. ສະພາວະທຳທັງປວງເປັນສະຕິປັດຖານແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ຊົນເຫຼົ່າໃດບໍ່ຈະເລີນກາຍະຄະຕາສະຕິ ຊົນເຫຼົ່ານັ້ນຊື່ວ່າບໍ່ບັນລຸອະມະຕະທຳ ຊົນເຫຼົ່າໃດຈະເລີນກາຍະຄະຕາສະຕິ ຊົນເຫຼົ່ານັ້ນຊື່ວ່າບັນລຸອະມະຕະທຳ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ສັດທັງປວງຈະເລີນ ໄດ້ສະເພາະ ຊ້ອງເສບ ຈະເລີນ ເຮັດໃຫ້ຫຼາຍເຊິ່ງກາຍະຄະຕາສະຕິ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທັງປວງເປັນສະຕິປັດຖານແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ທາງນີ້ເປັນທາງດຽວເພື່ອຄວາມບໍຣິສຸດຂອງເຫຼົ່າສັດ ເພື່ອລ່ວງໂສກະແລະປະຣິເທວະ ເພື່ອດັບທຸກແລະໂທມະນັດ ເພື່ອບັນລຸຍາຍະທຳ ເພື່ອເຮັດໃຫ້ແຈ້ງນິບພານ ທາງນີ້ຄືສະຕິປັດຖານ ໔" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທັງປວງເປັນທາງສາຍດຽວແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທັງປວງເປັນສະຕິປັດຖານແມ່ນບໍ? ປະຣິນາຍົກ

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ຍ້ອນພຣະເຈົ້າຈັກກະພັດຜາກົດ ແກ້ວ ໗ ປະການຈຶ່ງຜາກົດ ແກ້ວ ໗ ປະການ ອັນໃດແດ່ ຄື (໑) ຈັກກະແກ້ວ (໒) ຊ້າງແກ້ວ (໓) ມ້າແກ້ວ (໔) ມະນີແກ້ວ (໕) ນາງແກ້ວ (໖) ຄະຫະບໍດີແກ້ວ (໗) ປະຣິນາຍົກແກ້ວ ຍ້ອນພຣະເຈົ້າຈັກກະພັດຜາກົດ ແກ້ວ ໗ ປະການນີ້ຈຶ່ງຜາກົດ

ພິກຂຸທັງຫຼາຍ ຍ້ອນຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າຜາກົດ ແກ້ວຄືໂພດຊົງ ໗ ປະການຈຶ່ງຜາກົດ ແກ້ວ ໗ ປະການ ອັນໃດແດ່ ຄື (໑) ແກ້ວຄືສະຕິສຳໂພດຊົງ (໒) ແກ້ວຄືທຳມະວິຈະຍະສຳໂພດຊົງ (໓) ແກ້ວຄືວິຣິຍະສຳໂພດຊົງ (໔) ແກ້ວຄືປີຕິສຳໂພດຊົງ (໕) ແກ້ວຄືປັດສັດທິສຳໂພດຊົງ (໖) ແກ້ວຄືສະມາທິສຳໂພດຊົງ (໗) ແກ້ວຄືອຸເປກຂາສຳໂພດຊົງ ຍ້ອນຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າຜາກົດ ແກ້ວຄື ໂພດຊົງ ໗ ປະການນີ້ຈຶ່ງຜາກົດ"[໑] ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າຜາກົດ ສະພາວະທຳທັງປວງທີ່ເປັນແກ້ວຄື ສະຕິສຳໂພດຊົງຈຶ່ງຜາກົດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທັງປວງເປັນສະຕິປັດຖານແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທັງປວງເປັນສຳມັບປະທານ ຯລຯ ເປັນອິດທິບາດ ຯລຯ ເປັນອິນຊີ ຯລຯ ເປັນພະລະ ຯລຯ ເປັນໂພດຊົງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

**ສະຕິປັດຖານະກະຖາ ຈົບ**

## ໙. ເຫວັດຖິຕິກະຖາ
## ວ່າດ້ວຍສະພາວະທຳທີ່ມີຢູ່ໂດຍສະພາວະແນວນີ້

[໓໐໔] ສກ. ສະພາວະທຳທີ່ເປັນອະດີດມີຢູ່ແມ່ນບໍ?

ປຣ.໑ ສະພາວະທຳທີ່ເປັນອະດີດມີຢູ່ໂດຍສະພາວະແນວນີ້ ແຕ່ບໍ່ມີຢູ່ໂດຍສະພາວະແນວນີ້

ສກ. ສະພາວະທຳທີ່ເປັນອະດີດແນວດຽວກັນນັ້ນເອງທັງມີຢູ່ແລະບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ເປັນອະດີດແນວດຽວກັນນັ້ນເອງທັງມີຢູ່ແລະບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທີ່ມີຢູ່ກໍຄືສະພາວະທີ່ບໍ່ມີຢູ່ ສະພາວະທີ່ບໍ່ມີຢູ່ກໍຄືສະພາວະທີ່ມີຢູ່ ຄວາມມີຢູ່ກໍຄືຄວາມບໍ່ມີຢູ່ ຄວາມບໍ່ມີຢູ່ກໍຄືຄວາມມີຢູ່ ບັນຍັດວ່າ “ມີຢູ່” ກັບ “ບໍ່ມີຢູ່” ຫຼື ບັນຍັດວ່າ “ບໍ່ມີຢູ່” ກັບ “ມີຢູ່” ນີ້ນັ້ນມີຄວາມໝາຍແນວດຽວກັນ ສະເໝີກັນ ມີສ່ວນເທົ່າກັນ ມີສະພາບຄືກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ເປັນອະນາຄົດມີຢູ່ແມ່ນບໍ?

ປຣ. ສະພາວະທຳທີ່ເປັນອະນາຄົດມີຢູ່ໂດຍສະພາວະແນວນີ້ ບໍ່ມີຢູ່ໂດຍສະພາວະແນວນີ້

ສກ. ສະພາວະທຳທີ່ເປັນອະນາຄົດແນວດຽວກັນນັ້ນເອງທັງມີຢູ່ແລະບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ເປັນອະນາຄົດແນວດຽວກັນນັ້ນເອງທັງມີຢູ່ແລະບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທີ່ມີຢູ່ກໍຄືສະພາວະທີ່ບໍ່ມີຢູ່ ສະພາວະທີ່ບໍ່ມີຢູ່ກໍຄືສະພາວະທີ່ມີຢູ່ ຄວາມມີຢູ່ກໍຄືຄວາມບໍ່ມີຢູ່ ຄວາມບໍ່ມີຢູ່ກໍຄືຄວາມມີຢູ່ ບັນຍັດວ່າ "ມີຢູ່" ກັບ "ບໍ່ມີຢູ່" ຫຼື ບັນຍັດວ່າ "ບໍ່ມີຢູ່" ກັບ "ມີຢູ່" ນີ້ນັ້ນມີຄວາມໝາຍແນວດຽວກັນ ສະເໝີກັນ ມີສ່ວນເທົ່າກັນ ມີສະພາບຄືກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ເປັນປັດຈຸບັນມີຢູ່ແມ່ນບໍ?

ປຣ. ສະພາວະທຳທີ່ເປັນປັດຈຸບັນມີຢູ່ໂດຍສະພາວະແນວນີ້ ບໍ່ມີຢູ່ໂດຍສະພາວະແນວນີ້

ສກ. ສະພາວະທຳທີ່ເປັນປັດຈຸບັນແນວດຽວກັນນັ້ນເອງທັງມີຢູ່ແລະບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ເປັນປັດຈຸບັນແນວດຽວກັນນັ້ນເອງທັງມີຢູ່ແລະບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທີ່ມີຢູ່ກໍຄືສະພາວະທີ່ບໍ່ມີຢູ່ ຯລຯ ນີ້ນັ້ນມີຄວາມໝາຍແນວດຽວກັນ ສະເໝີກັນ ມີສ່ວນເທົ່າກັນ ມີສະພາບຄືກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໓໐໕] ສກ. ສະພາວະທຳທີ່ເປັນອະດີດມີຢູ່ໂດຍສະພາວະແນວນີ້ ແຕ່ບໍ່ມີຢູ່ໂດຍສະພາວະແນວນີ້ແມ່ນບໍ?

ປຣ. ແມ່ນ

ສກ. ມີຢູ່ໂດຍສະພາວະແນວໃດ ບໍ່ມີຢູ່ໂດຍສະພາວະແນວໃດ

ປຣ. ສະພາວະທຳທີ່ເປັນອະດີດມີຢູ່ໂດຍສະພາວະແນວນີ້ວ່າ "ເປັນອະດີດ" ບໍ່ມີຢູ່ໂດຍສະພາວະແນວນີ້ວ່າ "ເປັນອະນາຄົດ" ບໍ່ມີຢູ່ໂດຍພາວະແນວນີ້ວ່າ "ເປັນປັດຈຸບັນ"

ສກ. ສະພາວະທຳທີ່ເປັນອະດີດແນວດຽວກັນນັ້ນເອງທັງມີຢູ່ແລະບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ເປັນອະດີດແນວດຽວກັນນັ້ນເອງທັງມີຢູ່ ແລະບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທີ່ມີຢູ່ກໍຄືສະພາວະທີ່ບໍ່ມີຢູ່ ສະພາວະທີ່ບໍ່ມີຢູ່ກໍຄືສະພາວະທີ່ມີຢູ່ ຄວາມມີຢູ່ກໍຄືຄວາມບໍ່ມີຢູ່ ຄວາມບໍ່ມີຢູ່ກໍຄືຄວາມມີຢູ່ ບັນຍັດວ່າ "ມີຢູ່" ກັບ "ບໍ່ມີຢູ່" ຫຼື ບັນຍັດວ່າ "ບໍ່ມີຢູ່" ກັບ "ມີຢູ່" ນີ້ນັ້ນມີຄວາມໝາຍແນວດຽວກັນ ສະເໝີກັນ ມີສ່ວນເທົ່າກັນ ມີສະພາບຄືກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ເປັນອະນາຄົດມີຢູ່ໂດຍສະພາວະແນວນີ້ ແຕ່ບໍ່ມີຢູ່ໂດຍສະພາວະແນວນີ້ແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ເປັນອະນາຄົດມີຢູ່ໂດຍສະພາວະແນວໃດ ບໍ່ມີຢູ່ໂດຍສະພາວະແນວໃດ

ປຣ. ສະພາວະທຳທີ່ເປັນອະນາຄົດມີຢູ່ໂດຍສະພາວະແນວນີ້ວ່າ "ເປັນອະນາຄົດ" ບໍ່ມີຢູ່ໂດຍສະພາວະແນວນີ້ວ່າ "ເປັນອະດີດ" ບໍ່ມີຢູ່ໂດຍສະພາວະແນວນີ້ວ່າ "ເປັນປັດຈຸບັນ"

ສກ. ສະພາວະທຳທີ່ເປັນອະນາຄົດແນວດຽວກັນນັ້ນເອງທັງມີຢູ່ແລະບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ເປັນອະນາຄົດແນວດຽວກັນນັ້ນເອງທັງມີຢູ່ແລະບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທີ່ມີຢູ່ກໍຄືສະພາວະທີ່ບໍ່ມີຢູ່ ສະພາວະທີ່ບໍ່ມີຢູ່ກໍຄືສະພາວະທີ່ມີຢູ່ ຯລຯ ນີ້ນັ້ນມີຄວາມໝາຍແນວດຽວກັນ ສະເໝີກັນ ມີສ່ວນເທົ່າກັນ ມີສະພາບຄືກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ເປັນປັດຈຸບັນມີຢູ່ໂດຍສະພາວະແນວນີ້ ແຕ່ບໍ່ມີຢູ່ໂດຍສະພາວະແນວນີ້ແມ່ນບໍ?

ປຣ. ແມ່ນ

ສກ. ມີຢູ່ໂດຍສະພາວະແນວໃດ ບໍ່ມີຢູ່ໂດຍສະພາວະແນວໃດ?

ປຣ. ສະພາວະທຳທີ່ເປັນປັດຈຸບັນມີຢູ່ໂດຍສະພາວະແນວນີ້ວ່າ "ເປັນປັດຈຸບັນ" ບໍ່ມີຢູ່ໂດຍສະພາວະແນວນີ້ວ່າ "ເປັນອະດີດ" ບໍ່ມີຢູ່ໂດຍສະພາວະແນວນີ້ວ່າ "ເປັນອະນາຄົດ"

ສກ. ສະພາວະທຳທີ່ເປັນປັດຈຸບັນແນວດຽວກັນນັ້ນເອງທັງມີຢູ່ແລະບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ເປັນປັດຈຸບັນແນວດຽວກັນນັ້ນເອງທັງມີຢູ່ແລະບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທີ່ມີຢູ່ກໍຄືສະພາວະທີ່ບໍ່ມີຢູ່ ຯລຯ ນີ້ນັ້ນມີຄວາມໝາຍຢ່າງດຽວກັນສະເໝີກັນ ມີສ່ວນເທົ່າກັນ ມີສະພາບຄືກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ທ່ານບໍ່ຍອມຮັບວ່າ "ສະພາວະທຳທີ່ເປັນອະດີດມີຢູ່ໂດຍສະພາວະແນວນີ້ ບໍ່ມີຢູ່ໂດຍສະພາວະແນວນີ້ ສະພາວະທຳທີ່ເປັນອະນາຄົດມີຢູ່ໂດຍສະພາວະແນວນີ້ ບໍ່ມີຢູ່ໂດຍສະພາວະແນວນີ້ ສະພາວະທຳທີ່ເປັນປັດຈຸບັນມີຢູ່ໂດຍສະພາວະແນວນີ້ ບໍ່ມີຢູ່ໂດຍສະພາວະແນວນີ້" ແມ່ນບໍ?

ສກ. ແມ່ນ

ປຣ. ສະພາວະທຳທີ່ເປັນອະດີດມີຢູ່ໂດຍສະພາວະແນວນີ້ວ່າ "ເປັນອະນາຄົດ" ມີຢູ່ໂດຍສະພາວະແນວນີ້ວ່າ "ເປັນປັດຈຸບັນ" ສະພາວະທຳທີ່ເປັນອະນາຄົດມີຢູ່ໂດຍສະພາວະແນວນີ້ວ່າ "ເປັນອະດີດ" ມີຢູ່ໂດຍສະພາວະແນວນີ້ວ່າ "ເປັນປັດຈຸບັນ" ສະພາວະທຳທີ່ເປັນປັດຈຸບັນມີຢູ່ໂດຍສະພາວະແນວນີ້ວ່າ "ເປັນອະດີດ" ມີຢູ່ໂດຍສະພາວະແນວນີ້ວ່າ "ເປັນອະນາຄົດ" ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ດັ່ງນັ້ນ ສະພາວະທຳທີ່ເປັນອະດີດກໍມີຢູ່ໂດຍສະພາວະແນວນີ້ ບໍ່ມີຢູ່ໂດຍສະພາວະແນວນີ້ ສະພາວະທຳທີ່ເປັນອະນາຄົດມີຢູ່ໂດຍສະພາວະແນວນີ້ ບໍ່ມີຢູ່ໂດຍສະພາວະແນວນີ້ ສະພາວະທຳທີ່ເປັນປັດຈຸບັນມີຢູ່ໂດຍສະພາວະແນວນີ້ ບໍ່ມີຢູ່ໂດຍສະພາວະແນວນີ້

[໓໐໖] ສກ. ຮູບມີຢູ່ແມ່ນບໍ?

ປຣ. ມີຢູ່ໂດຍສະພາວະແນວນີ້ ບໍ່ມີຢູ່ໂດຍສະພາວະແນວນີ້

ສກ. ຮູບແນວດຽວກັນນັ້ນເອງທັງມີຢູ່ແລະບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບແນວດຽວກັນນັ້ນເອງທັງມີຢູ່ແລະບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທີ່ມີຢູ່ກໍຄືສະພາວະທີ່ບໍ່ມີຢູ່ ສະພາວະທີ່ບໍ່ມີຢູ່ກໍຄືສະພາວະທີ່ມີຢູ່ ຄວາມມີຢູ່ກໍຄືຄວາມບໍ່ມີຢູ່ ຄວາມບໍ່ມີຢູ່ກໍຄືຄວາມມີຢູ່ ບັນຍັດວ່າ "ມີຢູ່" ກັບ "ບໍ່ມີຢູ່" ຫຼືບັນຍັດວ່າ "ບໍ່ມີຢູ່" ກັບ "ມີຢູ່" ນີ້ນັ້ນມີຄວາມໝາຍແນວດຽວກັນ ສະເໝີກັນ ມີສ່ວນເທົ່າກັນ ມີສະພາບຄືກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານມີຢູ່ແມ່ນບໍ?

ປຣ. ມີຢູ່ໂດຍສະພາວະແນວນີ້ ບໍ່ມີຢູ່ໂດຍສະພາວະແນວນີ້

ສກ. ວິນຍານແນວດຽວກັນນັ້ນເອງທັງມີຢູ່ແລະບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວິນຍານແນວດຽວກັນນັ້ນເອງທັງມີຢູ່ແລະບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທີ່ມີຢູ່ກໍຄືສະພາວະທີ່ບໍ່ມີຢູ່ ຯລຯ ສະເໝີກັນ ມີສ່ວນເທົ່າກັນ ມີສະພາບຄືກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບມີຢູ່ໂດຍສະພາວະແນວນີ້ ບໍ່ມີຢູ່ໂດຍສະພາວະແນວນີ້ແມ່ນບໍ?

ປຣ. ແມ່ນ

ສກ. ຮູບມີຢູ່ໂດຍສະພາວະແນວໃດ ບໍ່ມີຢູ່ໂດຍສະພາວະແນວໃດ

ປຣ. ຮູບມີຢູ່ໂດຍສະພາວະແບບນີ້ວ່າ "ເປັນຮູບ" ຮູບບໍ່ມີຢູ່ໂດຍສະພາວະແບບນີ້ວ່າ "ເປັນເວທະນາ ຯລຯ ເປັນສັນຍາ ຯລຯ ເປັນສັງຂານ ຯລຯ ເປັນວິນຍານ"

ສກ. ຮູບແບບດຽວກັນນັ້ນເອງທັງມີຢູ່ແລະບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

ສກ. ຮູບແບບດຽວກັນນັ້ນເອງທັງມີຢູ່ແລະບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທີ່ມີຢູ່ກໍຄືສະພາວະທີ່ບໍ່ມີຢູ່ ຯລຯ ສະເໝີກັນ ມີສ່ວນເທົ່າກັນ ມີສະພາບຄືກັນແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

ສກ. ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານມີຢູ່ໂດຍສະພາວະແບບນີ້ ບໍ່ມີຢູ່ໂດຍສະພາວະແບບນີ້ແມ່ນບໍ?

ປຣ. ແມ່ນ

ສກ. ວິນຍານມີຢູ່ໂດຍສະພາວະແບບໃດ ບໍ່ມີຢູ່ໂດຍສະພາວະແບບໃດ

ປຣ. ວິນຍານມີຢູ່ໂດຍສະພາວະແບບນີ້ວ່າເປັນ "ວິນຍານ" ວິນຍານບໍ່ມີຢູ່ໂດຍສະພາວະແບບນີ້ວ່າ "ເປັນຮູບ ຯລຯ ເປັນເວທະນາ ຯລຯ ເປັນສັນຍາ ຯລຯ ເປັນສັງຂານ"

ສກ. ວິນຍານແບບດຽວກັນນັ້ນເອງທັງມີຢູ່ແລະບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

ສກ. ວິນຍານແບບດຽວກັນນັ້ນເອງທັງມີຢູ່ແລະບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທີ່ມີຢູ່ກໍຄືສະພາວະທີ່ບໍ່ມີຢູ່ ຯລຯ ສະເໝີກັນ ມີສ່ວນເທົ່າກັນ ມີສະພາບຄືກັນແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

ປຣ. ທ່ານບໍ່ຍອມຮັບວ່າ "ຮູບມີຢູ່ໂດຍສະພາວະແບບນີ້ ບໍ່ມີຢູ່ໂດຍສະພາວະແບບນີ້ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານມີຢູ່ໂດຍສະພາວະແບບນີ້ ບໍ່ມີຢູ່ ໂດຍສະພາວະແບບນີ້" ແມ່ນບໍ?

ສກ. ແມ່ນ

ປຣ. ຮູບມີຢູ່ໂດຍສະພາວະແບບນີ້ວ່າ "ເປັນເວທະນາ ຯລຯ ເປັນສັນຍາ ຯລຯ ເປັນສັງຂານ ຯລຯ ເປັນວິນຍານ" ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານ ມີຢູ່ໂດຍສະພາວະແບບນີ້ວ່າ "ເປັນຮູບ" ວິນຍານມີຢູ່ໂດຍສະພາວະແບບນີ້ວ່າ "ເປັນເວທະນາ" ວິນ

ຍານມີຢູ່ໂດຍສະພາວະແນວນີ້ວ່າ "ເປັນສັນຍາ" ວິນຍານມີຢູ່ໂດຍສະພາວະແນວນີ້ວ່າ "ເປັນສັງຂານ" ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ດັ່ງນັ້ນ ຮູບຈຶ່ງມີຢູ່ໂດຍສະພາວະແນວນີ້ ບໍ່ມີຢູ່ໂດຍສະພາວະແນວນີ້ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານມີຢູ່ໂດຍສະພາວະແນວນີ້ ບໍ່ມີຢູ່ໂດຍສະພາວະແນວນີ້

**ເຫວັດຖຸຕິກະຖາ ຈົບ**

**ມະຫາວັກທີ ໑ ຈົບ**

## ລວມກະຖາທີ່ມີໃນວັກນີ້ ຄື

໑. ປຸກຄະລະກະຖາ
໒. ພົມມະຈະຣິຍະກະຖາ (ກ)
໔. ຊະຫະຕິກະຖາ
໖. ອະຕິຕັກຂັນທາທີກະຖາ
໗. ສະຕິປັດຖານະກະຖາ
໘. ປະຣິຫານີກະຖາ
໓. ໂອທີໂສກະຖາ (ຂ)
໕. ສັບພະມັດຖິຕິກະຖາ
໗. ເອກັດຈະມັດຖິຕິກະຖາ
໙. ເຫວັດຖຸຕິກະຖາ

# ໘. ທຸຕິຍະວັກ

## ໑. ປະຣູປະຫາຣະກະຖາ (໑໐)

### ວ່າດ້ວຍເລື້ອງທີ່ບຸກຄົນອື່ນນຳເຂົ້າໄປໃຫ້

[໓໐໗] ສກ. ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຣາຄະ ການຣາຄະ ການຣາຄະປະຣິຍຸດຖານ ການຣາຄະສັງໂຍດ ກາໂມຄະ ການໂຍຄະ ການສັນທະນິວອນຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຣາຄະ ການຣາຄະ ການຣາຄະປະຣິຍຸດຖານ ການຣາຄະສັງໂຍດ ກາໂມຄະ ການໂຍຄະ ການສັນທະນິວອນຂອງພຣະອະຣະຫັນບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ຫາກຣາຄະ ການຣາຄະ ການຣາຄະປະຣິຍຸດຖານ ການຣາຄະສັງໂຍດ ກາໂມຄະ ການໂຍຄະ ການສັນທະນິວອນຂອງພຣະອະຣະຫັນບໍ່ມີ ທ່ານກໍບໍ່ຄວນຍອມຮັບວ່າ "ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນມີຢູ່"

ສກ. ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງປຸຖຸຊົນມີຢູ່ ແລະຣາຄະ ການຣາຄະ ການຣາຄະປະຣິຍຸດຖານ ການຣາຄະສັງໂຍດ ກາໂມຄະ ການໂຍຄະ ການສັນທະນິວອນຂອງປຸຖຸຊົນນັ້ນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນມີຢູ່ ແລະຣາຄະ ການຣາຄະ ການຣາຄະປະຣິຍຸດຖານ ຯລຯ ການສັນທະນິວອນຂອງພຣະອະຣະຫັນນັ້ນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນມີຢູ່ ແລະຣາຄະ ການຣາຄະ ການຣາຄະປະຣິຍຸດຖານ ຯລຯ ການສັນທະນິວອນຂອງພຣະອະຣະຫັນນັ້ນກໍມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງປຸຖຸຊົນມີຢູ່ ແລະຣາຄະ ການຣາຄະ ການຣາຄະປະຣິຍຸດຖານ ຯລຯ ການສັນທະນິວອນຂອງປຸຖຸຊົນນັ້ນບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນເຫດໃດ?

ປຣ. ຍ້ອນວ່າ ພວກເທວະດາຜູ້ນັບເນື່ອງໃນໝູ່ມານນຳນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິເຂົ້າໄປໃຫ້ແກ່ພຣະອະຣະຫັນ

ສກ. ພວກເທວະດາຜູ້ນັບເນື່ອງໃນໝູ່ມານນຳນ້ຳອະສຸຈິ ແລະການປ່ອຍນ້ຳອະສຸຈິເຂົ້າໄປໃຫ້ແກ່ພຣະອະຣະຫັນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ນ້ຳອະສຸຈິ ແລະການປ່ອຍນ້ຳອະສຸຈິຂອງພວກເທວະດາຜູ້ນັບເນື່ອງໃນໝູ່ມານມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພວກເທວະດາຜູ້ນັບເນື່ອງໃນໝູ່ມານບໍ່ມີນ້ຳອະສຸຈິ ແລະການປ່ອຍນ້ຳອະສຸຈິແມ່ນບໍ?

ປຣ. ແມ່ນ

ສກ. ຫາກພວກເທວະດາຜູ້ນັບເນື່ອງໃນໝູ່ມານບໍ່ມີນ້ຳອະສຸຈິ ແລະການປ່ອຍນ້ຳອະສຸຈິທ່ານກໍບໍ່ຄວນຍອມຮັບວ່າ "ພວກເທວະດາຜູ້ນັບເນື່ອງໃນໝູ່ມານນຳນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິເຂົ້າໄປໃຫ້ແກ່ພຣະອະຣະຫັນໄດ້"

ສກ. ພວກເທວະດາຜູ້ນັບເນື່ອງໃນໝູ່ມານນຳນ້ຳອະສຸຈິ ແລະການປ່ອຍນ້ຳອະສຸຈິເຂົ້າໄປໃຫ້ແກ່ພຣະອະຣະຫັນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພວກເທວະດາຜູ້ນັບເນື່ອງໃນໝູ່ມານນຳນ້ຳອະສຸຈິ ແລະການປ່ອຍນ້ຳອະສຸຈິເຂົ້າໄປໃຫ້ແກ່ຕົນ ໃຫ້ແກ່ຄົນເຫຼົ່າອື່ນ ແກ່ບຸກຄົນນັ້ນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພວກເທວະດາຜູ້ນັບເນື່ອງໃນໝູ່ມານນຳນ້ຳອະສຸຈິ ແລະການປ່ອຍນ້ຳອະສຸຈິເຂົ້າໄປໃຫ້ແກ່ຕົນ ໃຫ້ແກ່ຄົນເຫຼົ່າອື່ນ ໃຫ້ແກ່ບຸກຄົນນັ້ນບໍ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພວກເທວະດາຜູ້ນັບເນື່ອງໃນໝູ່ມານນຳນ້ຳອະສຸຈິ ແລະການປ່ອຍນ້ຳອະສຸຈິເຂົ້າໄປໃຫ້ແກ່ຕົນ ໃຫ້ແກ່ຄົນເຫຼົ່າອື່ນ ໃຫ້ແກ່ບຸກຄົນນັ້ນບໍ່ໄດ້ ທ່ານກໍບໍ່ຄວນຍອມຮັບວ່າ "ພວກເທວະດາ ຜູ້ນັບເນື່ອງໃນໝູ່ມານ ນຳນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິເຂົ້າໄປໃຫ້ແກ່ພຣະອະຣະຫັນໄດ້"

ສກ. ພວກເທວະດາຜູ້ນັບເນື່ອງໃນໝູ່ມານນຳນ້ຳອະສຸຈິ ແລະການປ່ອຍນ້ຳອະສຸຈິເຂົ້າໄປໃຫ້ແກ່ພຣະອະຣະຫັນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ນຳເຂົ້າໄປທາງຂຸມຂົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໓໐໗] ສກ. ພວກເທວະດາຜູ້ນັບເນື່ອງໃນໝູ່ມານນຳນ້ຳອະສຸຈິ ແລະການປ່ອຍນ້ຳອະສຸຈິ ເຂົ້າໄປໃຫ້ແກ່ພຣະອະຣະຫັນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນເຫດໃດ

ປຣ. ຍ້ອນຈະໃຫ້ທ່ານສົງໄສ

ສກ. ຄວາມສົງໄສຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມສົງໄສຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມສົງໄສໃນພຣະສາດສະດາ ໃນພຣະທຳ ໃນພຣະສົງ ໃນສິກຂາ ໃນສ່ວນເບື້ອງຕົ້ນ ໃນສ່ວນເບື້ອງປາຍ ໃນສ່ວນເບື້ອງຕົ້ນແລະເບື້ອງປາຍ ຄວາມສົງໄສໃນປະຕິດຈະສະມຸບບາດທີ່ວ່າ "ຍ້ອນທຳນີ້ເປັນປັດໄຈ ທຳນີ້ຈຶ່ງມີ" ຂອງພຣະອະຣະຫັນ ມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມສົງໄສໃນພຣະສາດສະດາ ໃນພຣະທຳ ໃນພຣະສົງ ໃນສິກຂາ ໃນສ່ວນເບື້ອງຕົ້ນ ໃນສ່ວນເບື້ອງປາຍ ໃນສ່ວນເບື້ອງຕົ້ນແລະສ່ວນເບື້ອງປາຍ ໃນປະຕິດຈະສະມຸບບາດທີ່ວ່າຍ້ອນທຳນີ້ເປັນປັດໄຈ ທຳນີ້ຈຶ່ງມີ ຂອງພຣະອະຣະຫັນ ບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ຫາກຄວາມສົງໄສໃນພຣະສາດສະດາ ຯລຯ ຄວາມສົງໄສໃນປະຕິດຈະສະມຸບບາດທີ່ວ່າ ຍ້ອນທຳນີ້ເປັນປັດໄຈ ທຳນີ້ຈຶ່ງມີ ຂອງພຣະອະຣະຫັນບໍ່ມີ ທ່ານກໍບໍ່ຄວນຍອມຮັບວ່າ "ຄວາມສົງໄສຂອງພຣະອະຣະຫັນມີຢູ່"

ສກ. ຄວາມສົງໄສຂອງປຸຖຸຊົນມີຢູ່ ແລະຄວາມສົງໄສໃນພຣະສາດສະດາ ຯລຯ ຄວາມສົງໄສໃນປະຕິດຈະສະມຸບບາດທີ່ວ່າຍ້ອນທຳນີ້ເປັນປັດໄຈ ທຳນີ້ຈຶ່ງມີ ຂອງປຸຖຸຊົນນັ້ນກໍມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມສົງໄສຂອງພຣະອະຣະຫັນມີຢູ່ ແລະຄວາມສົງໄສໃນພຣະສາດສະດາ ຯລຯ ຄວາມສົງໄສໃນປະຕິດຈະສະມຸບບາດທີ່ວ່າຍ້ອນທຳນີ້ເປັນປັດໄຈ ທຳນີ້ຈຶ່ງມີ ຂອງພຣະອະຣະຫັນນັ້ນກໍມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມສົງໄສຂອງພຣະອະຣະຫັນມີຢູ່ ແຕ່ຄວາມສົງໄສໃນພຣະສາດສະດາ ຯລຯ ຄວາມສົງໄສໃນປະຕິດຈະສະມຸບບາດທີ່ວ່າຍ້ອນທຳນີ້ເປັນປັດໄຈ ທຳນີ້ຈຶ່ງມີ ຂອງພຣະອະຣະຫັນນັ້ນບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ຄວາມສົງໄສຂອງປຸຖຸຊົນມີຢູ່ ແຕ່ຄວາມສົງໄສໃນພຣະສາດສະດາ ຯລຯ ຄວາມສົງໄສໃນປະຕິດຈະສະມຸບບາດທີ່ວ່າຍ້ອນທຳນີ້ເປັນປັດໄຈ ທຳນີ້ຈຶ່ງມີ ຂອງປຸຖຸຊົນນັ້ນ ບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນເປັນຜົນຂອງອັນໃດ?

ປຣ. ເປັນຜົນຂອງການສັນ ການດື່ມ ການຫຍ້ຳ ແລະການຊີມ

ສກ. ນ້ຳອະສຸຈິ ແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນເປັນຜົນຂອງການສັນ ການດື່ມ ການຫຍ້ຳ ແລະການຊີມແມ່ນບໍ?

ປຣ. ແມ່ນ

ສກ. ຊົນເຫຼົ່າໃດເຫຼົ່າໜຶ່ງຍັງກິນ ດື່ມ ຫຍ້ຳ ຊີມຢູ່ ນ້ຳອະສຸຈິແລະການປ່ອຍນ້ຳ ອະສຸຈິຂອງຊົນເຫຼົ່ານັ້ນທັງໝົດມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຊົນເຫຼົ່າໃດເຫຼົ່າໜຶ່ງຍັງກິນ ດື່ມ ຫຍ້ຳ ຊີມຢູ່ ນ້ຳອະສຸຈິແລະການປ່ອຍນ້ຳ ອະສຸຈິຂອງຊົນເຫຼົ່ານັ້ນທັງໝົດມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພວກເດັກອ່ອນຍັງກິນ ດື່ມ ຫຍ້ຳ ຊີມຢູ່ ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງພວກເດັກອ່ອນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພວກບັນເດາະຍັງກິນ ດື່ມ ຫຍ້ຳ ຊີມຢູ່ ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງພວກບັນເດາະມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພວກເທວະດາຍັງກິນ ດື່ມ ຫຍ້ຳ ຊີມຢູ່ ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງພວກເທວະດາມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໓໐໗] ສກ. ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນ ເປັນຜົນຂອງການສັນ ການດື່ມ ການຫຍ້ຳ ແລະການຊີມແມ່ນບໍ?

ປຣ. ແມ່ນ

ສກ. ຖ້າງນ້ຳອະສຸຈິນັ້ນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອຸດຈາຣະປັດສາວະຂອງພຣະອະຣະຫັນ ເປັນຜົນຂອງການສັນ ການດື່ມ ແລະການຫຍ້ຳ ລຳໄສ້ໃຫຍ່ ແລະກະເພາະປັດສາວະ ເຊິ່ງເປັນບ່ອນຕັ້ງຂອງອຸດຈາຣະປັດສາວະນັ້ນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນ ເປັນຜົນຂອງການສັນ ການດື່ມ ການຫຍ້ຳ ແລະການຊີມ ຖ້າງນ້ຳອະສຸຈິນັ້ນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ນ້ຳອະສຸຈິ ແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນ ເປັນຜົນຂອງການສັນ ການດື່ມ ການຫຍ້ຳ ແລະການຊີມ (ແຕ່) ຖ້າງນ້ຳອະສຸຈິນັ້ນບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ອຸດຈາຣະ ແລະປັດສາວະຂອງພຣະອະຣະຫັນເປັນຜົນຂອງການສັນ ການດື່ມ ການຫຍ້ຳແລະການຊີມ (ແຕ່) ລຳໄສ້ໃຫຍ່ ແລະກະເພາະປັດສາວະຂອງອຸດຈາຣະປັດສາວະນັ້ນບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໓໑໐] ສກ. ນ້ຳອະສຸຈິ ແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຈະເພິ່ງເສບເມຖຸນທຳ ຈະເພິ່ງໃຫ້ເມຖຸນທຳເກີດ ຈະເພິ່ງຢູ່ຄອບຄອງບ່ອນນອນເຊິ່ງຍັດຢຽດດ້ວຍບຸດ ຈະເພິ່ງໃຊ້ສອຍຜ້າກາສີກະພັດແລະຂອງຫອມ ຈະເພິ່ງທັດຊົງດອກໄມ້ ຂອງຫອມ ແລະເຄື່ອງລູບທາ ຈະເພິ່ງຍິນດີຄຳແລະເງິນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງປຸຖຸຊົນມີຢູ່ ແລະປຸຖຸຊົນຈະເພິ່ງເສບເມຖຸນທຳ ຈະເພິ່ງໃຫ້ເມຖຸນທຳເກີດ ຯລຯ ຈະເພິ່ງຍິນດີຄຳ ແລະເງິນແມ່ນບໍ?

ປຣ. ແມ່ນ

ສກ. ນ້ຳອະສຸຈິ ແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນມີຢູ່ ພຣະອະຣະຫັນຈະເພິ່ງເສບເມຖຸນທຳ ຈະເພິ່ງໃຫ້ເມຖຸນທຳເກີດ ຯລຯ ຈະເພິ່ງຍິນດີຄຳແລະເງິນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ນ້ຳອະສຸຈິ ແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນມີຢູ່ ແລະພຣະອະຣະຫັນຈະບໍ່ເພິ່ງເສບເມຖຸນທຳ ຈະບໍ່ເພິ່ງໃຫ້ເມຖຸນທຳເກີດ ຯລຯ ຈະບໍ່ເພິ່ງຍິນດີຄຳແລະເງິນແມ່ນບໍ?

ປຣ. ແມ່ນ

ສກ. ນ້ຳອະສຸຈິ ແລະການປ່ອຍນ້ຳອະສຸຈິຂອງປຸຖຸຊົນມີຢູ່ ແລະປຸຖຸຊົນຈະບໍ່ເພິ່ງເສບເມຖຸນທຳ ຈະບໍ່ເພິ່ງໃຫ້ເມຖຸນທຳເກີດ ຈະບໍ່ເພິ່ງຢູ່ຄອບຄອງບ່ອນນອນເຊິ່ງຍັດຢຽດດ້ວຍ ບຸດຈະບໍ່ເພິ່ງໃຊ້ສອຍຜ້າກາສີກະພັດແລະຂອງຫອມ ຈະບໍ່ເພິ່ງທັດຊົງດອກໄມ້ຂອງຫອມ ແລະເຄື່ອງລູບທາ ຈະບໍ່ເພິ່ງຍິນດີຄຳແລະເງິນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຣາຄະພຣະອະຣະຫັນລະໄດ້ແລ້ວ ຕັດຮາກກົ່ນເຫງົ້າ ເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຣາຄະພຣະອະຣະຫັນລະໄດ້ແລ້ວ ຕັດຮາກກົ່ນເຫງົ້າ ເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ທ່ານກໍບໍ່ຄວນຍອມຮັບວ່າ "ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນມີຢູ່"

ສກ. ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ໂທສະພຣະອະຣະຫັນລະໄດ້ແລ້ວ ຯລຯ ໂມຫະພຣະອະຣະຫັນລະໄດ້ແລ້ວ ຯລຯ ມານະພຣະອະຣະຫັນລະໄດ້ແລ້ວ ຯລຯ ທິດຖິພຣະອະຣະຫັນລະໄດ້ແລ້ວ ຯລຯ ວິຈິກິດສາພຣະອະຣະຫັນລະໄດ້ແລ້ວ ຯລຯ ຖີນະພຣະອະຣະຫັນລະໄດ້ແລ້ວ ຯລຯ ອຸດທັດຈະພຣະອະຣະຫັນລະໄດ້ແລ້ວ ຯລຯ ອະຫິຣິກະພຣະອະຣະຫັນລະໄດ້ແລ້ວ ຯລຯ ອະໂນດຕັບປະພຣະອະຣະຫັນລະໄດ້ແລ້ວ ຕັດຮາກກົ່ນເຫງົ້າ ເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວເຫຼືອແຕ່ພື້ນທີ່ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກອະໂນດຕັບປະພຣະອະຣະຫັນລະໄດ້ແລ້ວ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວເຫຼືອແຕ່ພື້ນທີ່ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ທ່ານກໍບໍ່ຄວນຍອມຮັບວ່າ "ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນມີຢູ່"

[໓໑໑] ສກ. ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຈະເລີນມັກເພື່ອລະຣາຄະແລ້ວບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະອະຣະຫັນຈະເລີນມັກເພື່ອລະຣາຄະແລ້ວ ທ່ານກໍບໍ່ຄວນຍອມຮັບວ່າ "ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນມີຢູ່"

ສກ. ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຈະເລີນສະຕິປັດຖານ ຯລຯ ສຳມັບປະທານ ຯລຯ ອິດທິບາດ ຯລຯ ອິນຊີ ຯລຯ ພະລະ ຯລຯ ໂພດຊົງ ເພື່ອລະຣາຄະບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະອະຣະຫັນຈະເລີນໂພດຊົງເພື່ອລະຣາຄະ ທ່ານກໍບໍ່ຄວນຍອມຮັບວ່າ "ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນມີຢູ່"

ສກ. ນ້ຳອະສຸຈິ ແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຈະເລີນມັກ ຯລຯ ຈະເລີນໂພດຊົງ ເພື່ອລະໂທສະ ຯລຯ ເພື່ອລະໂມຫະ ຯລຯ ເພື່ອລະອະໂນດຕັບປະບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະອະຣະຫັນຈະເລີນໂພດຊົງເພື່ອລະອະໂນດຕັບປະ ທ່ານກໍບໍ່ຄວນຍອມຮັບວ່າ "ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນມີຢູ່"

ສກ. ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນເປັນຜູ້ປາສະຈາກຣາຄະ ໂທສະ ໂມຫະ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາລະແລ້ວ ບັນລຸປະໂຫຍດຕົນແລ້ວ ໝົດສິ້ນກິເລດເປັນເຄື່ອງຜູກສັດໄວ້ໃນພົບແລ້ວ ລຸດພົ້ນຍ້ອນຮູ້ຊອບແລ້ວ ຖອດຫຼິ້ມສະລັກ ຖົມຄູ ຖອນເສົາຣະນຽດໄດ້ແລ້ວ ບໍ່ມີບານປະຕູ ເປັນພຣະອະຣິຍະ ປົດທຸງຄືມານະ ວາງພາລະຄືຂັນ ໝົດເຄື່ອງຜູກພັນ ຊະນະຢ່າງວິເສດແລ້ວ ກຳນົດຮູ້ທຸກ ລະສະມຸໄທ ເຮັດໃຫ້ແຈ້ງນິໂຣດ ຈະເລີນມັກແລ້ວ ຮູ້ຍິ່ງທຳທີ່ຄວນຮູ້ຍິ່ງ ກຳນົດຮູ້ທຳທີ່ຄວນກຳນົດຮູ້ ລະທຳທີ່ຄວນລະ ຈະເລີນທຳທີ່ຄວນຈະເລີນ ເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງແລ້ວບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະອະຣະຫັນເປັນຜູ້ປາສະຈາກຣາຄະ ໂທສະ ໂມຫະ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ຯລຯ ເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງ ທ່ານກໍບໍ່ຄວນຍອມຮັບວ່າ "ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນມີຢູ່"

[໓໑໘] ສກ. ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ນ້ຳອະສຸຈິ ແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນຜູ້ສະຫຼາດໃນທຳຂອງຕົນມີຢູ່ ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນຜູ້ສະຫຼາດໃນທຳອື່ນບໍ່ມີ

ສກ. ນ້ຳອະສຸຈິ ແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນ ຜູ້ສະຫຼາດໃນທຳຂອງຕົນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ນ້ຳອະສຸຈິ ແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນ ຜູ້ສະຫຼາດໃນທຳອື່ນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ນ້ຳອະສຸຈິ ແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນ ຜູ້ສະຫຼາດໃນທຳອື່ນບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ນ້ຳອະສຸຈິ ແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນຜູ້ສະຫຼາດໃນທຳຂອງຕົນບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຣາຄະພຣະອະຣະຫັນ ຜູ້ສະຫຼາດໃນທຳຂອງຕົນລະໄດ້ແລ້ວ (ແຕ່) ນ້ຳອະສຸຈິແລະການປ່ອຍ ນ້ຳອະສຸຈິຂອງພຣະອະຣະຫັນນັ້ນຍັງມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຣາຄະພຣະອະຣະຫັນຜູ້ສະຫຼາດໃນທຳອື່ນລະໄດ້ແລ້ວ (ແຕ່) ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນນັ້ນຍັງມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂທສະ ຯລຯ ໂມຫະ ຯລຯ ອະໂນດຕັບປະພຣະອະຣະຫັນຜູ້ສະຫຼາດໃນທຳຂອງຕົນລະໄດ້ແລ້ວ (ແຕ່) ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນນັ້ນຍັງມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ອະໂນດຕັບປະພຣະອະຣະຫັນຜູ້ສະຫຼາດໃນທຳອື່ນລະໄດ້ແລ້ວ (ແຕ່) ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນນັ້ນຍັງມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນຜູ້ສະຫຼາດໃນທຳຂອງຕົນຈະເລີນມັກ ຯລຯ ຈະເລີນໂພດຊົງ ເພື່ອລະຣາຄະ ຯລຯ ເພື່ອລະໂທສະ ຯລຯ ເພື່ອລະໂມຫະ ຯລຯ ເພື່ອລະອະໂນດຕັບປະ (ແຕ່) ນ້ຳອະສຸຈິ ແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນນັ້ນຍັງມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຜູ້ສະຫຼາດໃນທຳອື່ນ ຈະເລີນໂພດຊົງເພື່ອລະອະໂນດຕັບປະ (ແຕ່) ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນນັ້ນຍັງມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນຜູ້ສະຫຼາດໃນທຳຂອງຕົນເປັນຜູ້ປາສະຈາກຣາຄະ ໂທສະ ໂມຫະ ແລ້ວ ຯລຯ ເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງແລ້ວ ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນນັ້ນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຜູ້ສະຫຼາດໃນທຳອື່ນ ເປັນຜູ້ປາສະຈາກຣາຄະ ໂທສະ ໂມຫະແລ້ວ ຯລຯ ເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງແລ້ວ (ແຕ່) ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນນັ້ນ ຍັງມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຣາຄະພຣະອະຣະຫັນຜູ້ສະຫຼາດໃນທຳອື່ນລະໄດ້ແລ້ວ ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນນັ້ນບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ຣາຄະພຣະອະຣະຫັນຜູ້ສະຫຼາດໃນທຳຂອງຕົນລະໄດ້ແລ້ວ ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນນັ້ນບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນຜູ້ສະຫຼາດໃນທຳອື່ນລະໂທສະ ຯລຯ ໂມຫະ ຯລຯ ອະໂນດຕັບປະໄດ້ແລ້ວ ນ້ຳອະສຸຈິ ແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນນັ້ນບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ອະໂນດຕັບປະພຣະອະຣະຫັນຜູ້ສະຫຼາດໃນທຳຂອງຕົນລະໄດ້ແລ້ວ ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນນັ້ນບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນຜູ້ສະຫຼາດໃນທຳອື່ນຈະເລີນມັກ ຯລຯ ຈະເລີນໂພດຊົງ ຯລຯ ເພື່ອລະຣາຄະ ຯລຯ ເພື່ອລະໂທສະ ຯລຯ ເພື່ອລະໂມຫະ ຯລຯ ເພື່ອລະອະໂນດຕັບປະ ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນນັ້ນບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຜູ້ສະຫຼາດໃນທຳຂອງຕົນຈະເລີນໂພດຊົງ ເພື່ອລະອະໂນດຕັບປະ ນ້ຳອະສຸຈິ ແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນນັ້ນບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນຜູ້ສະຫຼາດໃນທຳອື່ນເປັນຜູ້ປາສະຈາກຣາຄະ ໂທສະ ໂມຫະແລ້ວ ຯລຯ ເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງແລ້ວ ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນນັ້ນບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຜູ້ສະຫຼາດໃນທຳຂອງຕົນເປັນຜູ້ປາສະຈາກຣາຄະ ໂທສະ ໂມຫະແລ້ວ ຯລຯ ເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງແລ້ວ ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນນັ້ນບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໓໑໓] ສກ. ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ພິກຂຸຜູ້ເປັນປຸຖຸຊົນເຖິງພ້ອມດ້ວຍສິນ ມີສະຕິສຳປະຊັນຍະ ຈຳວັດ ນ້ຳອະສຸຈິຂອງພິກຂຸເຫຼົ່ານັ້ນຍ່ອມບໍ່ໄຫຼອອກມາ ນ້ຳອະສຸຈິແມ່ນຂອງພວກຣືສີນອກສາດສະໜາ ຜູ້ປາສະຈາກຄວາມກຳໜັດໃນກາມ ຍ່ອມບໍ່ໄຫຼອອກມາ ພິກຂຸທັງຫຼາຍ ຍ່ອມບໍ່ມີທາງເປັນໄປໄດ້ ບໍ່ແມ່ນໂອກາດທີ່ນ້ຳອະສຸຈິຂອງພຣະອະຣະຫັນຈະເພິ່ງໄຫລອອກມາ"[໑] ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດ້ວຍເຫດນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ນ້ຳອະສຸຈິແລະການປ່ອຍນ້ຳອະສຸຈິຂອງພຣະອະຣະຫັນມີຢູ່"

ປຣ. ທ່ານບໍ່ຍອມຮັບວ່າ "ການທີ່ບຸກຄົນອື່ນນຳ (ປັດໄຈ) ເຂົ້າໄປໃຫ້ແກ່ພຣະອະຣະຫັນມີຢູ່" ແມ່ນບໍ?

ສກ. ແມ່ນ

ປຣ. ບຸກຄົນເຫຼົ່າອື່ນຈະເພິ່ງນຳຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດ ບໍຣິຂານເຂົ້າໄປໃຫ້ແກ່ພຣະອະຣະຫັນໄດ້ບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກບຸກຄົນເຫຼົ່າອື່ນຈະເພິ່ງນຳຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈ ເພສັດບໍຣິຂານເຂົ້າໄປໃຫ້ແກ່ພຣະອະຣະຫັນໄດ້ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ການທີ່ບຸກຄົນອື່ນ ນຳປັດໄຈເຂົ້າໄປໃຫ້ແກ່ພຣະອະຣະຫັນກໍມີໄດ້"

ສກ. ບຸກຄົນເຫຼົ່າອື່ນຈະເພິ່ງນຳຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດ ບໍຣິຂານເຂົ້າໄປໃຫ້ແກ່ພຣະອະຣະຫັນໄດ້ ຍ້ອນເຫດນັ້ນ ການທີ່ບຸກຄົນອື່ນນຳ (ປັດໄຈ) ເຂົ້າໄປໃຫ້ແກ່ພຣະອະຣະຫັນຈຶ່ງມີໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນເຫຼົ່າອື່ນຈະເພິ່ງນຳໂສດາປັດຕິຜົນ ສະກະທາຄາມີຜົນ ອະນາຄາມີຜົນ ຫຼື ອະຣະຫັດຕະຜົນເຂົ້າໄປໃຫ້ແກ່ພຣະອະຣະຫັນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

**ປະຣູປະຫາຣະກະຖາ ຈົບ**

## ໔. ອັນຍານະກະຖາ (໑໑)

## ວ່າດ້ວຍຄວາມບໍ່ຮູ້

[໓໑໔] ສກ. ຄວາມບໍ່ຮູ້ຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ອະວິດຊາ ອະວິດໂຊຄະ ອະວິດຊາໂຍຄະ ອະວິດຊານຸໄສ ອະວິດຊາປະຣິຍຸດ ຖານ ອະວິດຊາ ສັງໂຍດ ອະວິດຊານິວອນຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ອະວິດຊາ ອະວິດໂຊຄະ ອະວິດຊາໂຍຄະ ອະວິດຊານຸໄສ ອະວິດຊາປະຣິຍຸດ ຖານ ອະວິດຊາ ສັງໂຍດອະວິດຊານິວອນຂອງພຣະອະຣະຫັນບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ຫາກອະວິດຊາ ອະວິດໂຊຄະ ອະວິດຊາໂຍຄະ ອະວິດຊານຸໄສ ອະວິດຊາປະຣິ ຍຸດຖານ ອະວິດຊາສັງໂຍດ ອະວິດຊານິວອນຂອງພຣະອະຣະຫັນບໍ່ມີ ທ່ານກໍບໍ່ຄວນຍອມຮັບວ່າ "ຄວາມບໍ່ຮູ້ຂອງພຣະອະຣະຫັນມີຢູ່"

ສກ. ຄວາມບໍ່ຮູ້ຂອງປຸຖຸຊົນມີຢູ່ ແລະອະວິດຊາ ອະວິດໂຊຄະ ອະວິດຊາໂຍຄະ ອະວິດຊາ ນຸໄສ ອະວິດຊາປະຣິຍຸດຖານ ອະວິດຊາສັງໂຍດ ອະວິດຊານິວອນຂອງປຸຖຸຊົນນັ້ນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມບໍ່ຮູ້ຂອງພຣະອະຣະຫັນມີຢູ່ ແລະອະວິດຊາ ອະວິດໂຊຄະ ອະວິດຊາໂຍຄະ ອະວິດຊານຸໄສ ອະວິດຊາປະຣິຍຸດຖານ ອະວິດຊາສັງໂຍດ ອະວິດຊານິວອນຂອງ ພຣະອະຣະ ຫັນນັ້ນກໍມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ຄວາມບໍ່ຮູ້ຂອງພຣະອະຣະຫັນມີຢູ່ ແຕ່ອະວິດຊາ ອະວິດໂຊຄະ ອະວິດຊາ ໂຍຄະ ອະວິດຊານຸໄສ ອະວິດຊາປະຣິຍຸດຖານ ອະວິດຊາສັງໂຍດ ອະວິດຊານິວອນຂອງພຣະ ອະຣະຫັນ ບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ຄວາມບໍ່ຮູ້ຂອງປຸຖຸຊົນມີຢູ່ ແຕ່ອະວິດຊາ ອະວິດໂຊຄະ ອະວິດຊາໂຍຄະ ອະວິດຊານຸໄສ ອະວິດຊາສັງໂຍດ ອະວິດຊານິວອນຂອງປຸຖຸຊົນບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ຄວາມບໍ່ຮູ້ຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຖືກຄວາມບໍ່ຮູ້ຄອບງຳ ຈະເພິ່ງຂ້າສັດ ລັກຊັບ ເວົ້າຕົວະ ເວົ້າສັບສໍ່ ເວົ້າຄຳຫຍາບ ເວົ້າໂລເລ ຕັດຊ່ອງຢ່ອງເບົາ ປຸ້ນສະດົມ ປຸ້ນເຮືອນຫຼັງດຽວ ດັກປຸ້ນໃນທາງປ່ຽວ ຜິດເມຍຂອງຜູ້ອື່ນ ປຸ້ນຊາວບ້ານ ປຸ້ນຊາວນິຄົມແມ່ນບໍ່?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ຄວາມບໍ່ຮູ້ຂອງປຸຖຸຊົນມີຢູ່ ປຸຖຸຊົນຖືກຄວາມບໍ່ຮູ້ຄອບງຳຈະເພິ່ງຂ້າສັດ ລັກຊັບ ເວົ້າຕົວະ ฯລฯ ປຸ້ນຊາວບ້ານ ປຸ້ນຊາວນິຄົມແມ່ນບໍ?

ປຣ. ແມ່ນ

ສກ. ຄວາມບໍ່ຮູ້ຂອງພຣະອະຣະຫັນມີຢູ່ ພຣະອະຣະຫັນຖືກຄວາມບໍ່ຮູ້ຄອບງຳແລ້ວ ຈະເພິ່ງຂ້າສັດ ລັກຊັບ ฯລฯ ປຸ້ນຊາວບ້ານ ປຸ້ນຊາວນິຄົມແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ຄວາມບໍ່ຮູ້ຂອງພຣະອະຣະຫັນມີຢູ່ ແລະພຣະອະຣະຫັນຖືກຄວາມບໍ່ຮູ້ຄອບງຳແລ້ວ ບໍ່ເພິ່ງຂ້າສັດ ບໍ່ເພິ່ງລັກຊັບ ฯລฯ ບໍ່ປຸ້ນຊາວບ້ານ ບໍ່ປຸ້ນຊາວນິຄົມແມ່ນບໍ?

ປຣ. ແມ່ນ

ສກ. ຄວາມບໍ່ຮູ້ຂອງປຸຖຸຊົນມີຢູ່ ປຸຖຸຊົນຖືກຄວາມບໍ່ຮູ້ຄອບງຳແລ້ວ ບໍ່ເພິ່ງຂ້າສັດ ບໍ່ເພິ່ງລັກຊັບ ฯລฯ ບໍ່ປຸ້ນຊາວບ້ານ ບໍ່ປຸ້ນຊາວນິຄົມແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ຄວາມບໍ່ຮູ້ຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມບໍ່ຮູ້ໃນພຣະສາດສະດາ ໃນພຣະທຳ ໃນພຣະສົງ ໃນສິກຂາ ໃນສ່ວນເບື້ອງຕົ້ນ ໃນສ່ວນເບື້ອງປາຍ ໃນສ່ວນເບື້ອງຕົ້ນແລະສ່ວນເບື້ອງປາຍ ໃນປະຕິດຈະສະມຸບບາດ ທີ່ວ່າຍ້ອນທຳນີ້ເປັນປັດໄຈ ທຳນີ້ຈຶ່ງມີ ຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ຄວາມບໍ່ຮູ້ໃນພຣະສາດສະດາ ໃນພຣະທຳ ໃນພຣະສົງ ໃນສິກຂາ ໃນສ່ວນເບື້ອງຕົ້ນ ໃນສ່ວນເບື້ອງປາຍ ໃນສ່ວນເບື້ອງຕົ້ນແລະສ່ວນເບື້ອງປາຍ ຄວາມບໍ່ຮູ້ໃນປະຕິດຈະສະມຸບບາດທີ່ວ່າຍ້ອນທຳນີ້ເປັນປັດໄຈ ທຳນີ້ຈຶ່ງມີ ຂອງພຣະອະຣະຫັນບໍ່ມີ ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຄວາມບໍ່ຮູ້ໃນພຣະສາດສະດາ ໃນພຣະທຳ ໃນພຣະສົງ ຯລຯ ຄວາມບໍ່ຮູ້ ໃນປະຕິດຈະສະມຸບບາດທີ່ວ່າຍ້ອນທຳນີ້ເປັນປັດໄຈ ທຳນີ້ຈຶ່ງມີ ຂອງພຣະອະຣະຫັນບໍ່ມີ ທ່ານກໍບໍ່ຄວນຍອມຮັບວ່າ "ຄວາມບໍ່ຮູ້ຂອງພຣະອະຣະຫັນມີຢູ່"

ສກ. ຄວາມບໍ່ຮູ້ຂອງປຸຖຸຊົນມີຢູ່ ຄວາມບໍ່ຮູ້ໃນພຣະສາດສະດາ ໃນພຣະທຳ ໃນພຣະສົງ ຯລຯ ຄວາມບໍ່ຮູ້ໃນປະຕິດຈະສະມຸບບາດທີ່ວ່າ ຍ້ອນທຳນີ້ເປັນປັດໄຈທຳນີ້ຈຶ່ງມີ ຂອງປຸຖຸຊົນນັ້ນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມບໍ່ຮູ້ຂອງພຣະອະຣະຫັນມີຢູ່ ຄວາມບໍ່ຮູ້ໃນພຣະສາດສະດາ ໃນພຣະທຳ ໃນພຣະສົງ ຯລຯ ຄວາມບໍ່ຮູ້ປະຕິດຈະສະມຸບບາດທີ່ວ່າ ຍ້ອນທຳນີ້ເປັນປັດໄຈທຳນີ້ຈຶ່ງມີ ຂອງພຣະອະຣະຫັນນັ້ນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ຄວາມບໍ່ຮູ້ຂອງພຣະອະຣະຫັນມີຢູ່ ຄວາມບໍ່ຮູ້ໃນພຣະສາດສະດາ ໃນພຣະທຳ ໃນພຣະສົງ ຯລຯ ຄວາມບໍ່ຮູ້ໃນປະຕິດຈະສະມຸບບາດທີ່ວ່າ ຍ້ອນທຳນີ້ເປັນປັດໄຈທຳນີ້ຈຶ່ງມີຂອງພຣະອະຣະຫັນນັ້ນບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ຄວາມບໍ່ຮູ້ຂອງປຸຖຸຊົນມີຢູ່ ຄວາມບໍ່ຮູ້ໃນພຣະສາດສະດາ ໃນພຣະທຳ ໃນພຣະສົງ ຯລຯ ຄວາມບໍ່ຮູ້ໃນປະຕິດຈະສະມຸບບາດທີ່ວ່າຍ້ອນທຳນີ້ເປັນປັດໄຈ ທຳນີ້ຈຶ່ງມີ ຂອງປຸຖຸຊົນນັ້ນບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

[໓໑໔] ສກ. ຄວາມບໍ່ຮູ້ຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຣາຄະພຣະອະຣະຫັນລະໄດ້ແລ້ວ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຣາຄະພຣະອະຣະຫັນລະໄດ້ແລ້ວ ຕັດຮາກກົ່ນເຫງົ້າ ເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ທ່ານກໍບໍ່ຄວນຍອມຮັບວ່າ "ຄວາມບໍ່ຮູ້ຂອງພຣະອະຣະຫັນມີຢູ່"

ສກ. ຄວາມບໍ່ຮູ້ຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ໂທສະ ຯລຯ ໂມຫະ ຯລຯ ອະໂນດຕັບປະ ພຣະອະຣະຫັນລະໄດ້ແລ້ວ ຕັດຮາກກົ່ນເຫງົ້າ ເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່

ໄປບໍ່ໄດ້ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກອະໂນດຕັບປະພຣະອະຣະຫັນລະໄດ້ແລ້ວ ຕັດຮາກກົ່ນເຫງົ້າ ເໝືອນຕົ້ນຕານທີ່ ຖືກຕັດຮາກກົ່ນເຫງົ້າໄປແລ້ວເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ທ່ານກໍບໍ່ຄວນຍອມຮັບວ່າ "ຄວາມບໍ່ຮູ້ຂອງພຣະອະຣະຫັນມີຢູ່"

ສກ. ຄວາມບໍ່ຮູ້ຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຈະເລີນມັກ ຯລຯ ຈະເລີນໂພດຊົງ ເພື່ອລະຣາຄະແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະອະຣະຫັນຈະເລີນໂພດຊົງເພື່ອລະຣາຄະ ທ່ານກໍບໍ່ຄວນຍອມຮັບວ່າ "ຄວາມບໍ່ຮູ້ຂອງພຣະອະຣະຫັນມີຢູ່"

ສກ. ຄວາມບໍ່ຮູ້ຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຈະເລີນມັກ ຯລຯ ຈະເລີນໂພດຊົງ ເພື່ອລະໂທສະ ຯລຯ ເພື່ອລະໂມຫະ ຯລຯ ເພື່ອລະອະໂນດຕັບປະແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະອະຣະຫັນຈະເລີນໂພດຊົງ ເພື່ອລະອະໂນດຕັບປະ ທ່ານກໍບໍ່ຄວນຍອມຮັບວ່າ "ຄວາມບໍ່ຮູ້ຂອງພຣະອະຣະຫັນມີຢູ່"

ສກ. ຄວາມບໍ່ຮູ້ຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນເປັນຜູ້ປາສະຈາກຣາຄະ ໂທສະ ໂມຫະ ຯລຯ ເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະອະຣະຫັນເປັນຜູ້ປາສະຈາກຣາຄະ ຯລຯ ເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງແລ້ວ ທ່ານກໍບໍ່ຄວນຍອມຮັບວ່າ "ຄວາມບໍ່ຮູ້ຂອງພຣະອະຣະຫັນມີຢູ່"

[໓໑໖] ສກ. ຄວາມບໍ່ຮູ້ຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ຄວາມບໍ່ຮູ້ຂອງພຣະອະຣະຫັນຜູ້ສະຫຼາດໃນທຳຂອງຕົນມີຢູ່ ຄວາມບໍ່ຮູ້ຂອງພຣະອະຣະຫັນຜູ້ສະຫຼາດໃນທຳອື່ນບໍ່ມີ

ສກ. ຄວາມບໍ່ຮູ້ຂອງພຣະອະຣະຫັນຜູ້ສະຫຼາດໃນທຳຂອງຕົນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມບໍ່ຮູ້ຂອງພຣະອະຣະຫັນຜູ້ສະຫຼາດໃນທຳອື່ນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຄວາມບໍ່ຮູ້ຂອງພຣະອະຣະຫັນຜູ້ສະຫຼາດໃນທຳອື່ນບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ຄວາມບໍ່ຮູ້ຂອງພຣະອະຣະຫັນຜູ້ສະຫຼາດໃນທຳຂອງຕົນບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຣາຄະພຣະອະຣະຫັນຜູ້ສະຫຼາດໃນທຳຂອງຕົນລະໄດ້ແລ້ວ (ແຕ່) ຄວາມບໍ່ຮູ້ຂອງພຣະອະຣະຫັນນັ້ນຍັງມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຣາຄະພຣະອະຣະຫັນຜູ້ສະຫຼາດໃນທຳອື່ນລະໄດ້ແລ້ວ (ແຕ່) ຄວາມບໍ່ຮູ້ຂອງພຣະອະຣະຫັນນັ້ນຍັງມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ໂທສະ ฯລฯ ໂມຫະ ฯລฯ ອະໂນດຕັບປະ ພຣະອະຣະຫັນຜູ້ສະຫຼາດໃນທຳຂອງຕົນລະໄດ້ແລ້ວ (ແຕ່) ຄວາມບໍ່ຮູ້ຂອງພຣະອະຣະຫັນນັ້ນຍັງມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ອະໂນດຕັບປະພຣະອະຣະຫັນ ຜູ້ສະຫຼາດໃນທຳອື່ນລະໄດ້ແລ້ວ (ແຕ່) ຄວາມບໍ່ຮູ້ຂອງພຣະອະຣະຫັນນັ້ນຍັງມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ພຣະອະຣະຫັນຜູ້ສະຫຼາດໃນທຳຂອງຕົນຈະເລີນມັກ ฯລฯ ຈະເລີນໂພດຊົງເພື່ອລະຣາຄະ ຄວາມບໍ່ຮູ້ຂອງພຣະອະຣະຫັນນັ້ນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຜູ້ສະຫຼາດໃນທຳອື່ນ ຈະເລີນໂພດຊົງເພື່ອລະຣາຄະ ຄວາມບໍ່ຮູ້ຂອງພຣະອະຣະຫັນນັ້ນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ພຣະອະຣະຫັນຜູ້ສະຫຼາດໃນທຳຂອງຕົນຈະເລີນມັກ ฯລฯ ຈະເລີນໂພດຊົງເພື່ອລະໂທສະ ฯລฯ ເພື່ອລະໂມຫະ ฯລฯ ເພື່ອລະອະໂນດຕັບປະຄວາມບໍ່ຮູ້ຂອງພຣະອະຣະຫັນນັ້ນ ມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຜູ້ສະຫຼາດໃນທຳອື່ນຈະເລີນໂພດຊົງ ເພື່ອລະອະໂນດຕັບປະຄວາມບໍ່ຮູ້ຂອງພຣະອະຣະຫັນນັ້ນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ພຣະອະຣະຫັນຜູ້ສະຫຼາດໃນທຳຂອງຕົນເປັນຜູ້ປາສະຈາກຣາຄະ ໂທສະ ໂມຫະ ຯລຯ ເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງແລ້ວ (ແຕ່) ຄວາມບໍ່ຮູ້ຂອງພຣະອະຣະຫັນນັ້ນຍັງມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຜູ້ສະຫຼາດໃນທຳອື່ນເປັນຜູ້ປາສະຈາກຣາຄະ ໂທສະ ໂມຫະ ຯລຯ ເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງແລ້ວ (ແຕ່) ຄວາມບໍ່ຮູ້ຂອງພຣະອະຣະຫັນນັ້ນຍັງມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຣາຄະພຣະອະຣະຫັນຜູ້ສະຫຼາດໃນທຳອື່ນລະໄດ້ແລ້ວ ຄວາມບໍ່ຮູ້ຂອງພຣະອະຣະຫັນນັ້ນບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ຣາຄະພຣະອະຣະຫັນຜູ້ສະຫຼາດໃນທຳຂອງຕົນລະໄດ້ແລ້ວ ຄວາມບໍ່ຮູ້ຂອງພຣະອະຣະຫັນນັ້ນບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂທສະ ຯລຯ ໂມຫະ ຯລຯ ອະໂນດຕັບປະ ພຣະອະຣະຫັນຜູ້ສະຫຼາດໃນທຳອື່ນລະໄດ້ແລ້ວ ຄວາມບໍ່ຮູ້ຂອງພຣະອະຣະຫັນນັ້ນບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ອະໂນດຕັບປະພຣະອະຣະຫັນຜູ້ສະຫຼາດໃນທຳຂອງຕົນລະໄດ້ແລ້ວ ຄວາມບໍ່ຮູ້ຂອງພຣະອະຣະຫັນນັ້ນບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນຜູ້ສະຫຼາດໃນທຳອື່ນຈະເລີນມັກ ຯລຯ ຈະເລີນໂພດຊົງ ເພື່ອລະຣາຄະ ຯລຯ ເພື່ອລະໂທສະ ຯລຯ ເພື່ອລະໂມຫະ ຯລຯ ເພື່ອລະອະໂນດຕັບປະ ຄວາມບໍ່ຮູ້ຂອງພຣະອະຣະຫັນນັ້ນບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຜູ້ສະຫຼາດໃນທຳຂອງຕົນຈະເລີນໂພດຊົງ ເພື່ອລະອະໂນດຕັບປະ ຄວາມບໍ່ຮູ້ຂອງພຣະອະຣະຫັນນັ້ນບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນຜູ້ສະຫຼາດໃນທຳອື່ນເປັນຜູ້ປາສະຈາກຣາຄະ ໂທສະ ໂມຫະ ຯລຯ ເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງແລ້ວ ຄວາມບໍ່ຮູ້ຂອງພຣະອະຣະຫັນນັ້ນບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຜູ້ສະຫຼາດໃນທຳຂອງຕົນເປັນຜູ້ປາສະຈາກຣາຄະ ໂທສະ ໂມຫະ ຯລຯ ເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງແລ້ວ ຄວາມບໍ່ຮູ້ຂອງພຣະອະຣະຫັນນັ້ນບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໓໑໗] ສກ. ຄວາມບໍ່ຮູ້ຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ເຮົາກ່າວຄວາມສິ້ນໄປແຫ່ງອາສະວະຂອງບຸກຄົນຜູ້ຮູ້ຢູ່ ເຫັນຢູ່ ບໍ່ໄດ້ກ່າວຄວາມສິ້ນໄປແຫ່ງອາສະວະຂອງບຸກຄົນຜູ້ບໍ່ຮູ້ບໍ່ເຫັນ ເມື່ອບຸກຄົນຮູ້ ເຫັນແນວໃດ ຄວາມສິ້ນໄປແຫ່ງອາສະວະຈຶ່ງມີ ຄື ເມື່ອບຸກຄົນຮູ້ ເຫັນຢູ່ວ່າ ຮູບເປັນດັ່ງນີ້ ຄວາມເກີດຂຶ້ນແຫ່ງຮູບເປັນດັ່ງນີ້ ຄວາມດັບແຫ່ງຮູບເປັນດັ່ງນີ້ ເວທະນາເປັນດັ່ງນີ້ ฯລฯ ສັນຍາເປັນດັ່ງນີ້ ฯລฯ ສັງຂານເປັນດັ່ງນີ້ ฯລฯ ວິນຍານເປັນດັ່ງນີ້ ຄວາມເກີດຂຶ້ນແຫ່ງວິນຍານເປັນດັ່ງນີ້ ຄວາມດັບແຫ່ງວິນຍານເປັນດັ່ງນີ້ ເມື່ອບຸກຄົນຮູ້ ເຫັນແນວນີ້ ຄວາມສິ້ນໄປແຫ່ງອາສະວະຈຶ່ງມີ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ຄວາມບໍ່ຮູ້ຂອງພຣະອະຣະຫັນມີຢູ່"

ສກ. ຄວາມບໍ່ຮູ້ຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ເຮົາກ່າວຄວາມສິ້ນໄປແຫ່ງອາສະວະຂອງບຸກຄົນຜູ້ຮູ້ຢູ່ ເຫັນຢູ່ ບໍ່ໄດ້ກ່າວຄວາມສິ້ນໄປແຫ່ງອາສະວະຂອງບຸກຄົນຜູ້ບໍ່ຮູ້ບໍ່ເຫັນ ເມື່ອບຸກຄົນຮູ້ ເຫັນແນວໃດ ຄວາມສິ້ນໄປແຫ່ງອາສະວະຈຶ່ງມີ ຄື ເມື່ອບຸກຄົນຮູ້ເຫັນຢູ່ວ່ານີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ ເມື່ອບຸກຄົນຮູ້ເຫັນແນວນີ້ ຄວາມສິ້ນໄປແຫ່ງອາສະວະຈຶ່ງມີ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ຄວາມບໍ່ຮູ້ຂອງພຣະອະຣະຫັນມີຢູ່"

ສກ. ຄວາມບໍ່ຮູ້ຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ບຸກຄົນເມື່ອຍັງບໍ່ຮູ້ຍິ່ງບໍ່ກຳນົດຮູ້ ບໍ່ຄາຍກຳໜັດ ບໍ່ລະສິ່ງທັງປວງ ເປັນຜູ້ບໍ່ຄວນເພື່ອຄວາມສິ້ນທຸກ ແຕ່ບຸກຄົນເມື່ອຮູ້ຍິ່ງ ກຳນົດຮູ້ ຄາຍກຳໜັດ ລະສິ່ງທັງປວງ ເປັນຜູ້ຄວນເພື່ອຄວາມສິ້ນທຸກ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ຄວາມບໍ່ຮູ້ຂອງພຣະອະຣະຫັນມີຢູ່"

ສກ. ຄວາມບໍ່ຮູ້ຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ພຣະໂສດາບັນລະທຳ ໓ ປະການ ຄື
ສັກກາຍະທິດຖິ ວິຈິກິດສາ ແລະສີລັບພະຕະປະຣາມາດ
ໄດ້ຢ່າງໝົດສິ້ນແລ້ວ
ພ້ອມກັບການບັນລຸໂສດາປັດຕິມັກ
ພຣະໂສດາບັນກໍພົ້ນຈາກອະບາຍທັງ ໔
ແລະຈະບໍ່ເຮັດອະພິຖານ ໖"
ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ຄວາມບໍ່ຮູ້ຂອງພຣະອະຣະຫັນມີຢູ່"

ສກ. ຄວາມບໍ່ຮູ້ຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ໃນສະໄໝທີ່ທຳມະຈັກຂຸທີ່ປາສະຈາກທຸລີ ປາສະຈາກມົນທິນ ເກີດຂຶ້ນແກ່ອະຣິຍະສາວົກວ່າ "ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດມີຄວາມດັບເປັນທຳມະດາ" ພ້ອມກັບການເກີດຂຶ້ນແຫ່ງໂສດາປັດຕິມັກ ອະຣິຍະສາວົກຍ່ອມລະສັງໂຍດໄດ້ ໓ ປະການ ຄື ສັກກາຍະທິດຖິ ວິຈິກິດສາ ແລະສີລັບພະຕະປະຣາມາດ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ຄວາມບໍ່ຮູ້ຂອງພຣະອະຣະຫັນມີຢູ່"

ປຣ. ທ່ານບໍ່ຍອມຮັບວ່າ "ຄວາມບໍ່ຮູ້ຂອງພຣະອະຣະຫັນມີຢູ່" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະອະຣະຫັນບໍ່ຮູ້ຊື່ແລະໂຄດຂອງສະຕີແລະບຸຣຸດ ບໍ່ຮູ້ທາງແລະບໍ່ແມ່ນທາງ ບໍ່ຮູ້ຊື່ຂອງຫຍ້າ ໄມ້ ແລະຕົ້ນໄມ້ເຈົ້າປ່າໄດ້ບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກພຣະອະຣະຫັນບໍ່ຮູ້ຊື່ແລະໂຄດຂອງສະຕີແລະບຸຣຸດ ບໍ່ຮູ້ທາງແລະບໍ່ແມ່ນທາງ ບໍ່ຮູ້ຊື່ຂອງຫຍ້າ ໄມ້ ແລະຕົ້ນໄມ້ເຈົ້າປ່າໄດ້ ດັ່ງນັ້ນ ທ່ານຄວນຍອມຮັບວ່າ "ຄວາມບໍ່ຮູ້ຂອງພຣະອະຣະຫັນມີຢູ່"

ສກ. ພຣະອະຣະຫັນບໍ່ຮູ້ຊື່ ແລະໂຄດຂອງສະຕີແລະບຸຣຸດ ບໍ່ຮູ້ທາງແລະບໍ່ແມ່ນທາງ ບໍ່ຮູ້ ຊື່ຂອງຫຍ້າ ໄມ້ ແລະຕົ້ນໄມ້ເຈົ້າປ່າໄດ້ ຍ້ອນເຫດນັ້ນ ຄວາມບໍ່ຮູ້ຂອງພຣະອະຣະຫັນ ຈຶ່ງມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນບໍ່ຮູ້ໂສດາປັດຕິຜົນ ສະກະທາຄາມິຜົນ ອະນາຄາມິຜົນ ຫຼື ອະຣະຫັດຕະຜົນ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

**ອັນຍານະກະຖາ ຈົບ**

## ໓. ກັງຂາກະຖາ (໑໘)

## ວ່າດ້ວຍຄວາມສົງໄສ

[໓໑໗] ສກ. ຄວາມສົງໄສຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ວິຈິກິດສາ ວິຈິກິດສາປະຣິຍຸດຖານ ວິຈິກິດສາສັງໂຍດ ວິຈິກິດສານິວອນຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວິຈິກິດສາ ວິຈິກິດສາປະຣິຍຸດຖານ ວິຈິກິດສາສັງໂຍດ ວິຈິກິດສານິວອນຂອງພຣະອະຣະຫັນບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ຫາກວິຈິກິດສາ ວິຈິກິດສາປະຣິຍຸດຖານ ວິຈິກິດສາສັງໂຍດ ວິຈິກິດສານິວອນຂອງພຣະອະຣະຫັນບໍ່ມີ ທ່ານກໍບໍ່ຄວນຍອມຮັບວ່າ "ຄວາມສົງໄສຂອງພຣະອະຣະຫັນມີຢູ່"

ສກ. ຄວາມສົງໄສຂອງປຸຖຸຊົນມີຢູ່ ວິຈິກິດສາ ວິຈິກິດສາປະຣິຍຸດຖານ ວິຈິກິດສາສັງໂຍດ ວິຈິກິດສານິວອນຂອງປຸຖຸຊົນນັ້ນກໍມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມສົງໄສຂອງພຣະອະຣະຫັນມີຢູ່ ວິຈິກິດສາ ວິຈິກິດສາປະຣິຍຸດຖານ ວິຈິກິດສາສັງໂຍດ ວິຈິກິດສານິວອນຂອງພຣະອະຣະຫັນນັ້ນກໍມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມສົງໄສຂອງພຣະອະຣະຫັນມີຢູ່ ວິຈິກິດສາ ວິຈິກິດສາປະຣິຍຸດຖານ ວິຈິກິດສາສັງໂຍດ ວິຈິກິດສານິວອນຂອງພຣະອະຣະຫັນນັ້ນບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ຄວາມສົງໄສຂອງປຸຖຸຊົນມີຢູ່ ວິຈິກິດສາ ວິຈິກິດສາປະຣິຍຸດຖານ ວິຈິກິດສາສັງໂຍດ ວິຈິກິດສານິວອນຂອງປຸຖຸຊົນນັ້ນບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມສົງໄສຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມສົງໄສໃນພຣະສາດສະດາ ໃນພຣະທຳ ໃນພຣະສົງ ໃນສິກຂາ ໃນສ່ວນເບື້ອງຕົ້ນ ໃນສ່ວນເບື້ອງປາຍ ໃນສ່ວນເບື້ອງຕົ້ນແລະສ່ວນເບື້ອງປາຍ ຄວາມສົງໄສໃນປະຕິດຈະສະມຸບບາດທີ່ວ່າຍ້ອນທຳນີ້ເປັນປັດໄຈ ທຳນີ້ຈຶ່ງມີ ຂອງພຣະອະຣະຫັນມີຢູ່ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມສົງໄສໃນພຣະສາດສະດາ ໃນພຣະທຳ ໃນພຣະສົງ ຯລຯ ຄວາມສົງໄສໃນປະຕິດຈະສະມຸບບາດທີ່ວ່າ ຍ້ອນທຳນີ້ເປັນປັດໄຈ ທຳນີ້ຈຶ່ງມີ ຂອງພຣະອະຣະຫັນບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ຫາກຄວາມສົງໄສໃນພຣະສາດສະດາ ໃນພຣະທຳ ຯລຯ ຄວາມສົງໄສໃນປະຕິດຈະສະມຸບບາດທີ່ວ່າຍ້ອນທຳນີ້ເປັນປັດໄຈ ທຳນີ້ຈຶ່ງມີ ຂອງພຣະອະຣະຫັນບໍ່ມີ ທ່ານກໍບໍ່ຄວນຍອມຮັບວ່າ "ຄວາມສົງໄສຂອງພຣະອະຣະຫັນມີຢູ່"

ສກ. ຄວາມສົງໄສຂອງປຸຖຸຊົນມີຢູ່ ຄວາມສົງໄສໃນພຣະສາດສະດາ ໃນພຣະທຳ ຯລຯ ຄວາມສົງໄສໃນປະຕິດຈະສະມຸບບາດທີ່ວ່າຍ້ອນທຳນີ້ເປັນປັດໄຈ ທຳນີ້ຈຶ່ງມີ ຂອງປຸຖຸຊົນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມສົງໄສຂອງພຣະອະຣະຫັນມີຢູ່ ຄວາມສົງໄສໃນພຣະສາດສະດາໃນພຣະທຳ ຯລຯ ຄວາມສົງໄສໃນປະຕິດຈະສະມຸບບາດທີ່ວ່າ "ຍ້ອນທຳນີ້ເປັນປັດໄຈ ທຳນີ້ຈຶ່ງມີ" ຂອງພຣະອະຣະຫັນນັ້ນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມສົງໄສຂອງພຣະອະຣະຫັນມີຢູ່ ຄວາມສົງໄສໃນພຣະສາດສະດາ ໃນພຣະທຳ ຯລຯ ຄວາມສົງໄສໃນປະຕິດຈະສະມຸບບາດທີ່ວ່າ ຍ້ອນທຳນີ້ເປັນປັດໄຈ ທຳນີ້ຈຶ່ງມີ ຂອງພຣະອະຣະຫັນນັ້ນບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ຄວາມສົງໄສຂອງປຸຖຸຊົນມີຢູ່ ຄວາມສົງໄສໃນພຣະສາດສະດາ ໃນພຣະທຳ ຯລຯ ຄວາມສົງໄສໃນປະຕິດຈະສະມຸບບາດທີ່ວ່າ ຍ້ອນທຳນີ້ເປັນປັດໄຈ ທຳນີ້ຈຶ່ງມີ ຂອງປຸຖຸຊົນນັ້ນບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໓໑໗] ສກ. ຄວາມສົງໄສຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຣາຄະພຣະອະຣະຫັນລະໄດ້ແລ້ວ ຕັດຮາກກົ່ນເຫງົ້າ ເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຣາຄະພຣະອະຣະຫັນລະໄດ້ແລ້ວ ຕັດຮາກກົ່ນເຫງົ້າ ເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ທ່ານກໍບໍ່ຄວນຍອມຮັບວ່າ "ຄວາມສົງໄສຂອງພຣະອະຣະຫັນມີຢູ່"

ສກ. ຄວາມສົງໄສຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ໂທສະ ຯລຯ ໂມຫະ ຯລຯ ອະໂນດຕັບປະ ພຣະອະຣະຫັນລະໄດ້ແລ້ວ ຯລຯ ຈະເລີນມັກ ຯລຯ ຈະເລີນໂພດຊົງເພື່ອລະຣາຄະ ຯລຯ ເພື່ອລະໂທສະ ຯລຯ ເພື່ອລະອະໂນດຕັບປະ ພຣະອະຣະຫັນເປັນຜູ້ປາສະຈາກຣາຄະ ໂທສະ ໂມຫະ ຯລຯ ເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງແລ້ວບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະອະຣະຫັນເປັນຜູ້ປາສະຈາກຣາຄະ ໂທສະ ໂມຫະ ຯລຯ ເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງແລ້ວ ທ່ານກໍບໍ່ຄວນຍອມຮັບວ່າ "ຄວາມສົງໄສຂອງພຣະອະຣະຫັນມີຢູ່"

[໓໔໐] ສກ. ຄວາມສົງໄສຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ຄວາມສົງໄສຂອງພຣະອະຣະຫັນຜູ້ສະຫຼາດໃນທຳຂອງຕົນມີຢູ່ ຄວາມສົງໄສຂອງພຣະອະຣະຫັນຜູ້ສະຫຼາດໃນທຳອື່ນບໍ່ມີ

ສກ. ຄວາມສົງໄສຂອງພຣະອະຣະຫັນຜູ້ສະຫຼາດໃນທຳຂອງຕົນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມສົງໄສຂອງພຣະອະຣະຫັນຜູ້ສະຫຼາດໃນທຳອື່ນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມສົງໄສຂອງພຣະອະຣະຫັນຜູ້ສະຫຼາດໃນທຳອື່ນບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ຄວາມສົງໄສຂອງພຣະອະຣະຫັນຜູ້ສະຫຼາດໃນທຳຂອງຕົນບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຣາຄະພຣະອະຣະຫັນຜູ້ສະຫຼາດໃນທຳຂອງຕົນລະໄດ້ແລ້ວ (ແຕ່) ຄວາມສົງໄສຂອງພຣະອະຣະຫັນນັ້ນຍັງມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຣາຄະພຣະອະຣະຫັນຜູ້ສະຫຼາດໃນທຳອື່ນລະໄດ້ແລ້ວ (ແຕ່) ຄວາມສົງໄສຂອງພຣະອະຣະຫັນນັ້ນຍັງມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂທສະ ฯລฯ ໂມຫະ ฯລฯ ອະໂນດຕັບປະ ພຣະອະຣະຫັນຜູ້ສະຫຼາດໃນທຳຂອງຕົນລະໄດ້ແລ້ວ ຈະເລີນມັກ ฯລฯ ຈະເລີນໂພດຊົງເພື່ອລະຣາຄະฯລฯ ເພື່ອລະໂທສະ ฯລฯ ເພື່ອລະໂມຫະ ฯລฯ ເພື່ອລະອະໂນດຕັບປະ ฯລฯ ພຣະອະຣະຫັນຜູ້ສະຫຼາດໃນທຳຂອງຕົນເປັນຜູ້ປາສະຈາກ ຣາຄະ ໂທສະ ໂມຫະ ฯລฯ ເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງແລ້ວ ແຕ່ຄວາມສົງໄສຂອງພຣະອະຣະຫັນນັ້ນຍັງມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຜູ້ສະຫຼາດໃນທຳອື່ນ ເປັນຜູ້ປາສະຈາກຣາຄະ ໂທສະ ໂມຫະ ฯລฯ ເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງແລ້ວ (ແຕ່) ຄວາມສົງໄສຂອງພຣະອະຣະຫັນນັ້ນຍັງມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຣາຄະພຣະອະຣະຫັນຜູ້ສະຫຼາດໃນທຳອື່ນລະໄດ້ແລ້ວ ຄວາມສົງໄສຂອງພຣະ
ອະຣະຫັນນັ້ນບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ຣາຄະພຣະອະຣະຫັນຜູ້ສະຫຼາດໃນທຳຂອງຕົນລະໄດ້ແລ້ວ ຄວາມສົງໄສຂອງພຣະອະຣະຫັນນັ້ນບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ໂທສະ ฯລฯ ໂມຫະ ฯລฯ ອະໂນດຕັບປະ ພຣະອະຣະຫັນຜູ້ສະຫຼາດໃນທຳອື່ນລະໄດ້ແລ້ວ ฯລฯ ຈະເລີນມັກ ฯລฯ ຈະເລີນໂພດຊົງເພື່ອລະຣາຄະ ฯລฯ ເພື່ອລະໂທສະ ฯລฯ ເພື່ອລະໂມຫະ ฯລฯ ເພື່ອລະອະໂນດຕັບປະ ฯລฯ ພຣະອະຣະຫັນຜູ້ສະຫຼາດໃນທຳອື່ນເປັນຜູ້ປາສະຈາກຣາຄະ ໂທສະ ฯລฯ ເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງແລ້ວ ຄວາມສົງໄສຂອງພຣະອະຣະຫັນນັ້ນບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຜູ້ສະຫຼາດໃນທຳຂອງຕົນເປັນຜູ້ປາສະຈາກຣາຄະ ໂທສະ ฯລฯ ເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງແລ້ວ ຄວາມສົງໄສຂອງພຣະອະຣະຫັນນັ້ນບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໓໔໑] ສກ. ຄວາມສົງໄສຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ເຮົາກ່າວຄວາມສິ້ນໄປແຫ່ງອາສະວະຂອງບຸກຄົນຜູ້ຮູ້ຢູ່ ເຫັນຢູ່ ບໍ່ໄດ້ກ່າວຄວາມສິ້ນໄປແຫ່ງອາສະວະຂອງບຸກຄົນຜູ້ບໍ່ຮູ້ບໍ່ເຫັນ ເມື່ອບຸກຄົນຮູ້ ເຫັນແນວໃດ ຄວາມສິ້ນໄປແຫ່ງອາສະວະຈຶ່ງມີ ຄື ເມື່ອບຸກຄົນຮູ້ ເຫັນຢູ່

ວ່າ ຮູບເປັນດັ່ງນີ້ ฯลฯ ຄວາມດັບແຫ່ງວິນຍານເປັນດັ່ງນີ້ ເມື່ອບຸກຄົນຮູ້ເຫັນແນວນີ້ ຄວາມສິ້ນໄປແຫ່ງອາສະວະຈຶ່ງມີ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ຄວາມສົງໄສຂອງພຣະອະຣະຫັນມີຢູ່"

ສກ. ຄວາມສົງໄສຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ເຮົາກ່າວຄວາມສິ້ນໄປແຫ່ງອາສະວະຂອງບຸກຄົນຜູ້ຮູ້ຢູ່ ເຫັນຢູ່ ບໍ່ໄດ້ກ່າວຄວາມສິ້ນໄປແຫ່ງອາສະວະຂອງບຸກຄົນຜູ້ບໍ່ຮູ້ບໍ່ເຫັນ ເມື່ອບຸກຄົນຮູ້ ເຫັນແນວໃດ ຄວາມສິ້ນໄປແຫ່ງອາສະວະຈຶ່ງມີ ຄື ເມື່ອບຸກຄົນຮູ້ເຫັນຢູ່ວ່ານີ້ທຸກ ฯลฯ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ ເມື່ອບຸກຄົນຮູ້ເຫັນແນວນີ້ ຄວາມສິ້ນໄປແຫ່ງອາສະວະຈຶ່ງມີ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ຄວາມສົງໄສຂອງພຣະອະຣະຫັນມີຢູ່"

ສກ. ຄວາມສົງໄສຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ບຸກຄົນເມື່ອຍັງບໍ່ຮູ້ຍິ່ງບໍ່ກຳນົດຮູ້ ບໍ່ຄາຍກຳໜັດ ບໍ່ລະສິ່ງທັງປວງ ເປັນຜູ້ບໍ່ຄວນເພື່ອຄວາມສິ້ນທຸກ ແຕ່ບຸກຄົນເມື່ອຮູ້ຍິ່ງ ກຳນົດຮູ້ ຄາຍກຳໜັດ ລະສິ່ງທັງປວງ ເປັນຜູ້ຄວນເພື່ອຄວາມສິ້ນທຸກ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ຄວາມສົງໄສຂອງພຣະອະຣະຫັນມີຢູ່"

ສກ. ຄວາມສົງໄສຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພຣະໂສດາບັນລະທຳ ໓ ປະການ ຄືສັກກາຍະທິດຖິ ວິຈິກິດສາ ແລະສີລັບພະຕະປະຣາມາດໄດ້ຢ່າງໝົດສິ້ນແລ້ວ ພ້ອມກັບການບັນລຸໂສດາປັດຕິມັກ ພຣະໂສດາບັນກໍພົ້ນຈາກອະບາຍທັງ ໔ ແລະຈະບໍ່ເຮັດອະພິຖານ ໖" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ຄວາມສົງໄສຂອງພຣະອະຣະຫັນມີຢູ່"

ສກ. ຄວາມສົງໄສຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ໃນສະໄໝທີ່ທຳມະຈັກຂຸ ທີ່ປາສະຈາກທຸລີ ປາສະຈາກມົນທິນ ເກີດຂຶ້ນແກ່ອະຣິຍະສາວົກວ່າ "ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດມີຄວາມດັບເປັນທຳມະດາ" ພ້ອມກັບການເກີດຂຶ້ນແຫ່ງໂສດາປັດຕິມັກ ອະຣິຍະສາວົກຍ່ອມລະສັງໂຍດໄດ້ ໓ ປະການ ຄື ສັກກາຍະທິດຖິ ວິຈິກິດສາ ແລະສີລັບພະຕະປະຣາມາດ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ຄວາມສົງໄສຂອງພຣະອະຣະຫັນມີຢູ່"

ສກ. ຄວາມສົງໄສຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ເມື່ອໃດແລ ທຳທັງຫຼາຍຜາກົດແກ່ພາມ
ຜູ້ມີຄວາມພຽນເພ່ງຢູ່
ເມື່ອນັ້ນ ຄວາມສົງໄສທັງປວງຂອງພາມນັ້ນຍ່ອມສິ້ນໄປ
ຍ້ອນມາຮູ້ທຳພ້ອມທັງເຫດ
ເມື່ອໃດແລ ທຳທັງຫຼາຍຜາກົດແກ່ພາມ
ຜູ້ມີຄວາມພຽນ ເພ່ງຢູ່
ເມື່ອນັ້ນ ຄວາມສົງໄສທັງປວງຂອງພາມນັ້ນຍ່ອມສິ້ນໄປ
ຍ້ອນໄດ້ຮູ້ຄວາມສິ້ນໄປແຫ່ງປັດໄຈທັງຫຼາຍ
ເມື່ອໃດແລ ທຳທັງຫຼາຍຜາກົດແກ່ພາມ
ຜູ້ມີຄວາມພຽນ ເພ່ງຢູ່
ເມື່ອນັ້ນ ພາມນັ້ນຍ່ອມກຳຈັດມານແລະເສນາໄດ້ແລ
ເໝືອນພຣະອາທິດອຸໄທຂຶ້ນສາດສ່ອງທ້ອງຟ້າໃຫ້ສະຫວ່າງສະໄຫວສັນນັ້ນ
ຄວາມສົງໄສເຫຼົ່າໃດເຫຼົ່າໜຶ່ງ
ທີ່ມີໃນອັດຕະພາບນີ້ຫຼືໃນອັດຕະພາບອື່ນ
ທີ່ມີໃນຄວາມຮູ້ຂອງຕົນຫຼືໃນຄວາມຮູ້ຂອງຜູ້ອື່ນ
ບຸກຄົນຜູ້ເພ່ງພິນິດ ມີຄວາມພຽນ ປະພຶດພົມມະຈັນຢູ່
ຍ່ອມລະຄວາມສົງໄສເຫຼົ່ານັ້ນທັງໝົດໄດ້
ທານທີ່ໃຫ້ແລ້ວແກ່ບຸກຄົນຜູ້ຂ້າມຄວາມສົງໄສ
ຜູ້ໝົດຄວາມສົງໄສ
ຜູ້ປາສະຈາກຄວາມສົງໄສທັງທີ່ຄົນທັງຫຼາຍຍັງມີຄວາມສົງໄສຢູ່
ຍ່ອມມີຜົນຫຼາຍ

ການປະກາດທຳໃນທຳວິໄນນີ້ເປັນເຊັ່ນນີ້
ບໍ່ມີພຣະສາວົກຮູບໃດຈະສົງໄສອັນໃດ?
ໃນການປະກາດທຳນັ້ນເລີຍ
ພວກຂ້າພຣະອົງຂໍນອບນ້ອມພຣະຊິນນະພຸດທະເຈົ້າ
ຜູ້ຊົງເປັນຈອມຄົນ ຊົງຂ້າມໂອຄະໄດ້
ຊົງວິດຊາຄວາມສົງໄສໄດ້ແລ້ວ"

ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ຄວາມສົງໄສຂອງພຣະອະຣະຫັນມີຢູ່"

ປຣ. ທ່ານບໍ່ຍອມຮັບວ່າ "ຄວາມສົງໄສຂອງພຣະອະຣະຫັນມີຢູ່" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະອະຣະຫັນເພິ່ງສົງໄສໃນຊື່ແລະໂຄດຂອງສະຕີແລະບຸຣຸດ ໃນທາງແລະບໍ່ແມ່ນທາງ ໃນຊື່ຂອງຫຍ້າ ໄມ້ ແລະຕົ້ນໄມ້ເຈົ້າປ່າໄດ້ບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກພຣະອະຣະຫັນຈະເພິ່ງສົງໄສໃນຊື່ ແລະໂຄດຂອງສະຕີແລະບຸຣຸດ ໃນທາງແລະບໍ່ແມ່ນທາງ ໃນຊື່ຂອງຫຍ້າ ໄມ້ ແລະຕົ້ນໄມ້ເຈົ້າປ່າ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ຄວາມສົງໄສຂອງພຣະອະຣະຫັນມີຢູ່"

ສກ. ພຣະອະຣະຫັນຈະເພິ່ງສົງໄສໃນຊື່ແລະໂຄດຂອງສະຕີແລະບຸຣຸດ ໃນທາງແລະບໍ່ແມ່ນທາງ ໃນຊື່ຂອງຫຍ້າ ໄມ້ ແລະຕົ້ນໄມ້ເຈົ້າປ່າ ດັ່ງນັ້ນ ຄວາມສົງໄສຂອງພຣະອະຣະຫັນຈຶ່ງມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຈະເພິ່ງສົງໄສໃນໂສດາປັດຕິຜົນ ສະກະທາຄາມິຜົນ ອະນາຄາມິຜົນ ອະຣະຫັດຕະຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

**ກັງຂາກະຖາ ຈົບ**

## ໔. ປະຣະວິຕາຣະນະກະຖາ (໑໓)

## ວ່າດ້ວຍການຮັບຄຳແນະນຳຈາກຜູ້ອື່ນ

[໓໔໔] ສກ. ການຮັບຄຳແນະນຳຈາກຜູ້ອື່ນຂອງພຣະອະຣະຫັນມີແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຖືກຜູ້ອື່ນນຳໄປ ຖືກຜູ້ອື່ນດຶງຈູງໄປ ອາໄສຜູ້ອື່ນ ເກາະຜູ້ອື່ນ ບໍ່ໂງ່ຈ້າ ບໍ່ສະຫຼາດ ຍ່ອມບໍ່ຮູ້ ບໍ່ເຫັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ພຣະອະຣະຫັນບໍ່ຖືກຜູ້ອື່ນນຳໄປ ບໍ່ຖືກຜູ້ອື່ນຈູງໄປ ບໍ່ອາໄສຜູ້ອື່ນ ບໍ່ເກາະຜູ້ອື່ນ ບໍ່ໂງ່ຈ້າ ສະຫຼາດ ຍ່ອມຮູ້ ຍ່ອມເຫັນບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະອະຣະຫັນບໍ່ຖືກຜູ້ອື່ນນຳໄປ ບໍ່ຖືກຜູ້ອື່ນຈູງໄປ ບໍ່ອາໄສຜູ້ອື່ນ ບໍ່ເກາະ ຜູ້ອື່ນ ບໍ່ໂງ່ຈ້າ ສະຫຼາດ ຍ່ອມຮູ້ ຍ່ອມເຫັນ ທ່ານກໍບໍ່ຄວນຍອມຮັບວ່າ "ການຮັບຄຳແນະນຳຈາກຜູ້ອື່ນຂອງພຣະອະຣະຫັນມີຢູ່"

ສກ. ການຮັບຄຳແນະນຳຈາກຜູ້ອື່ນຂອງປຸຖຸຊົນມີຢູ່ ແລະເຂົາຖືກຜູ້ອື່ນນຳໄປ ຖືກຜູ້ອື່ນດຶງຈູງໄປອາໄສຜູ້ອື່ນ ເກາະຜູ້ອື່ນຢູ່ ໂງ່ຈ້າ ບໍ່ສະຫຼາດ ຍ່ອມບໍ່ຮູ້ ບໍ່ເຫັນແມ່ນບໍ?

ປຣ. ແມ່ນ

ສກ. ການຮັບຄຳແນະນຳຈາກຜູ້ອື່ນຂອງພຣະອະຣະຫັນມີຢູ່ ແລະທ່ານຖືກຜູ້ອື່ນນຳໄປ ຖືກຜູ້ອື່ນດຶງຈູງໄປ ອາໄສຜູ້ອື່ນ ເກາະຜູ້ອື່ນ ໂງ່ຈ້າ ບໍ່ສະຫຼາດ ຍ່ອມບໍ່ຮູ້ ບໍ່ເຫັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ການຮັບຄຳແນະນຳຈາກຜູ້ອື່ນຂອງພຣະອະຣະຫັນມີຢູ່ ແລະທ່ານບໍ່ຖືກຜູ້ອື່ນນຳໄປ ບໍ່ຖືກຜູ້ອື່ນດຶງຈູງໄປ ບໍ່ອາໄສຜູ້ອື່ນ ບໍ່ເກາະຜູ້ອື່ນ ບໍ່ໂງ່ຈ້າ ສະຫຼາດ ຍ່ອມຮູ້ ຍ່ອມເຫັນ ແມ່ນບໍ?

ປຣ. ແມ່ນ

ສກ. ການຮັບຄຳແນະນຳຈາກຜູ້ອື່ນຂອງປຸຖຸຊົນມີ ແລະເຂົາບໍ່ຖືກຜູ້ອື່ນນຳໄປ ບໍ່ຖືກຜູ້ອື່ນດຶງຈູງໄປ ບໍ່ອາໄສຜູ້ອື່ນ ບໍ່ເກາະຜູ້ອື່ນ ບໍ່ໂງ່ຈ້າ ສະຫຼາດ ຍ່ອມຮູ້ ຍ່ອມເຫັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ການຮັບຄຳແນະນຳຈາກຜູ້ອື່ນຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ການຮັບຄຳແນະນຳຈາກຜູ້ອື່ນໃນ (ເລື້ອງ) ພຣະສາດສະດາ ໃນ (ເລື້ອງ) ພຣະທຳ ໃນ (ເລື້ອງ) ພຣະສົງ ໃນສິກຂາ ໃນສ່ວນເບື້ອງຕົ້ນ ໃນສ່ວນເບື້ອງປາຍ ທັງໃນສ່ວນເບື້ອງຕົ້ນ ແລະສ່ວນເບື້ອງປາຍ ໃນປະຕິດຈະສະມຸບບາດທີ່ວ່າຍ້ອນທຳນີ້ເປັນປັດໄຈ ທຳນີ້ຈຶ່ງມີຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ການຮັບຄຳແນະນຳຈາກຜູ້ອື່ນໃນພຣະສາດສະດາ ໃນພຣະທຳ ฯລฯ ໃນປະຕິດຈະສະມຸບບາດທີ່ວ່າ ຍ້ອນທຳນີ້ເປັນປັດໄຈທຳນີ້ຈຶ່ງມີ ຂອງພຣະອະຣະຫັນບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ຫາກການຮັບຄຳແນະນຳຈາກຜູ້ອື່ນໃນພຣະສາດສະດາ ໃນພຣະທຳ ຯລຯ ໃນປະຕິດຈະສະມຸບບາດທີ່ວ່າຍ້ອນທຳນີ້ເປັນປັດໄຈ ທຳນີ້ຈຶ່ງມີຂອງພຣະອະຣະຫັນບໍ່ມີ ທ່ານກໍບໍ່ຄວນຍອມຮັບວ່າ "ການຮັບຄຳແນະນຳຈາກຜູ້ອື່ນຂອງພຣະອະຣະຫັນມີ"

ສກ. ການຮັບຄຳແນະນຳຈາກຜູ້ອື່ນຂອງປຸຖຸຊົນມີ ການຮັບຄຳແນະນຳຈາກຜູ້ອື່ນໃນພຣະສາດສະດາ ໃນພຣະທຳ ຯລຯ ໃນປະຕິດຈະສະມຸບບາດທີ່ວ່າ "ຍ້ອນທຳນີ້ເປັນປັດໄຈທຳນີ້ຈຶ່ງມີ" ຂອງປຸຖຸຊົນນັ້ນມີແມ່ນບໍ?

ປຣ. ແມ່ນ

ສກ. ການຮັບຄຳແນະນຳຈາກຜູ້ອື່ນຂອງພຣະອະຣະຫັນມີ ການຮັບຄຳແນະນຳຈາກຜູ້ອື່ນໃນພຣະສາດສະດາໃນພຣະທຳ ຯລຯ ໃນປະຕິດຈະສະມຸບບາດທີ່ວ່າຍ້ອນທຳນີ້ເປັນປັດໄຈ ທຳນີ້ຈຶ່ງມີ ຂອງພຣະອະຣະຫັນນັ້ນມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການຮັບຄຳແນະນຳຈາກຜູ້ອື່ນຂອງພຣະອະຣະຫັນມີຢູ່ ແລະການຮັບຄຳແນະນຳຈາກຜູ້ອື່ນໃນພຣະສາດສະດາ ໃນພຣະທຳ ຯລຯ ໃນປະຕິດຈະສະມຸບບາດທີ່ວ່າຍ້ອນທຳນີ້ເປັນປັດໄຈ ທຳນີ້ຈຶ່ງມີ ຂອງພຣະອະຣະຫັນນັ້ນບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ການຮັບຄຳແນະນຳຈາກຜູ້ອື່ນຂອງປຸຖຸຊົນມີຢູ່ ແລະການຮັບຄຳແນະນຳຈາກຜູ້ອື່ນໃນພຣະສາດສະດາ ໃນພຣະທຳ ຯລຯ ໃນປະຕິດຈະສະມຸບບາດທີ່ວ່າຍ້ອນທຳນີ້ເປັນປັດໄຈ ທຳນີ້ຈຶ່ງມີ ຂອງປຸຖຸຊົນນັ້ນບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໓໔໙] ສກ. ການຮັບຄຳແນະນຳຈາກຜູ້ອື່ນຂອງພຣະອະຣະຫັນມີແມ່ນບໍ?

ປຣ. ແມ່ນ

ສກ. ຣາຄະພຣະອະຣະຫັນລະໄດ້ແລ້ວ ຕັດຮາກກົ່ນເຫງົ້າ ເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຣາຄະພຣະອະຣະຫັນລະໄດ້ແລ້ວ ຕັດຮາກກົ່ນເຫງົ້າ ເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ທ່ານກໍບໍ່ຄວນຍອມຮັບວ່າ "ການຮັບຄຳແນະນຳຈາກຜູ້ອື່ນຂອງພຣະອະຣະຫັນມີ"

ສກ. ການຮັບຄຳແນະນຳຈາກຜູ້ອື່ນຂອງພຣະອະຣະຫັນມີແມ່ນບໍ?

ປຣ. ແມ່ນ

ສກ. ໂທສະ ฯລฯ ໂມຫະ ฯລฯ ອະໂນດຕັບປະ ພຣະອະຣະຫັນລະໄດ້ແລ້ວ ຕັດຮາກ ກົ່ນເຫງົ້າ ເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ฯລฯ ຈະເລີນມັກ ฯລฯ ຈະເລີນໂພດຊົງເພື່ອລະຣາຄະ ฯລฯ ເພື່ອລະໂທສະ ฯລฯ ເພື່ອລະອະໂນດຕັບປະບໍ່ແມ່ນບໍ?

ສກ. ພຣະອະຣະຫັນເປັນຜູ້ປາສະຈາກຣາຄະ ໂທສະ ໂມຫະ ເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງແລ້ວບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະອະຣະຫັນເປັນຜູ້ປາສະຈາກຣາຄະ ໂທສະ ໂມຫະ ฯລฯ ເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງແລ້ວ ທ່ານກໍບໍ່ຄວນຍອມຮັບວ່າ "ການຮັບຄຳແນະນຳຈາກຜູ້ອື່ນຂອງພຣະອະຣະຫັນມີ"

[໓໔໔] ສກ. ການຮັບຄຳແນະນຳຈາກຜູ້ອື່ນຂອງພຣະອະຣະຫັນມີແມ່ນບໍ?

ປຣ. ການຮັບຄຳແນະນຳຈາກຜູ້ອື່ນຂອງພຣະອະຣະຫັນ ຜູ້ສະຫຼາດໃນທຳຂອງຕົນມີ ແຕ່ການຮັບຄຳແນະນຳຈາກຜູ້ອື່ນຂອງພຣະອະຣະຫັນ ຜູ້ສະຫຼາດໃນທຳອື່ນບໍ່ມີ

ສກ. ການຮັບຄຳແນະນຳຈາກຜູ້ອື່ນຂອງພຣະອະຣະຫັນ ຜູ້ສະຫຼາດໃນທຳຂອງຕົນມີແມ່ນບໍ?

ປຣ. ແມ່ນ

ສກ. ການຮັບຄຳແນະນຳຈາກຜູ້ອື່ນຂອງພຣະອະຣະຫັນ ຜູ້ສະຫຼາດໃນທຳອື່ນມີ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ການຮັບຄຳແນະນຳຈາກຜູ້ອື່ນຂອງພຣະອະຣະຫັນ ຜູ້ສະຫຼາດໃນທຳອື່ນບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ການຮັບຄຳແນະນຳຈາກຜູ້ອື່ນຂອງພຣະອະຣະຫັນ ຜູ້ສະຫຼາດໃນທຳຂອງຕົນບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຣາຄະພຣະອະຣະຫັນຜູ້ສະຫຼາດໃນທຳຂອງຕົນລະໄດ້ແລ້ວ (ແຕ່) ການຮັບຄຳແນະນຳຈາກຜູ້ອື່ນຂອງພຣະອະຣະຫັນນັ້ນຍັງມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຜູ້ສະຫຼາດໃນທຳອື່ນລະຣາຄະໄດ້ແລ້ວ (ແຕ່) ການຮັບຄຳແນະນຳຈາກ ຜູ້ອື່ນຂອງພຣະອະຣະຫັນນັ້ນຍັງມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ໂທສະ ฯລฯ ໂມຫະ ฯລฯ ອະໂນດຕັບປະ ພຣະອະຣະຫັນຜູ້ສະຫຼາດໃນທຳຂອງຕົນ ລະໄດ້ແລ້ວ ฯລฯ ຈະເລີນມັກ ฯລฯ ຈະເລີນໂພດຊົງ ເພື່ອລະຣາຄະ ฯລฯ ເພື່ອລະ

ໂທສະ ฯລฯ ເພື່ອລະອະໂນດຕັບປະ ฯລฯ ເປັນຜູ້ປາສະຈາກຣາຄະ ໂທສະ ໂມຫະ ฯລฯ ເຮັດໃຫ້ແຈ້ງ ທຳທີ່ຄວນເຮັດໃຫ້ແຈ້ງແລ້ວ (ແຕ່) ການຮັບຄຳແນະນຳຈາກຜູ້ອື່ນຂອງພຣະອະຣະຫັນນັ້ນຍັງມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຜູ້ສະຫຼາດໃນທຳອື່ນ ເປັນຜູ້ປາສະຈາກຣາຄະ ໂທສະ ໂມຫະ ฯລฯ ເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງແລ້ວ (ແຕ່) ການຮັບຄຳແນະນຳຈາກຜູ້ອື່ນຂອງພຣະອະຣະຫັນນັ້ນຍັງມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຣາຄະພຣະອະຣະຫັນຜູ້ສະຫຼາດໃນທຳອື່ນລະໄດ້ແລ້ວ ການຮັບຄຳແນະນຳຈາກຜູ້ອື່ນ ຂອງພຣະອະຣະຫັນນັ້ນບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ຣາຄະພຣະອະຣະຫັນຜູ້ສະຫຼາດໃນທຳຂອງຕົນລະໄດ້ແລ້ວ ການຮັບຄຳແນະນຳຈາກ ຜູ້ອື່ນຂອງພຣະອະຣະຫັນນັ້ນບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ໂທສະ ฯລฯ ໂມຫະ ฯລฯ ອະໂນດຕັບປະ ພຣະອະຣະຫັນຜູ້ສະຫຼາດໃນທຳອື່ນລະໄດ້ແລ້ວ ฯລฯ ຈະເລີນມັກ ฯລฯ ຈະເລີນໂພດຊົງເພື່ອລະຣາຄະ ฯລฯ ເພື່ອລະໂທສະ ฯລฯ ເພື່ອລະອະໂນດຕັບປະ ฯລฯ ເປັນຜູ້ປາສະຈາກຣາຄະ ໂທສະ ໂມຫະ ฯລฯ ເຮັດໃຫ້ແຈ້ງ ທຳທີ່ຄວນເຮັດໃຫ້ແຈ້ງແລ້ວ ການຮັບຄຳແນະນຳຈາກຜູ້ອື່ນຂອງພຣະອະຣະຫັນນັ້ນບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຜູ້ສະຫຼາດໃນທຳຂອງຕົນເປັນຜູ້ປາສະຈາກຣາຄະ ໂທສະ ໂມຫະ ฯລฯ ເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງແລ້ວ ການຮັບຄຳແນະນຳຈາກຜູ້ອື່ນຂອງພຣະອະຣະຫັນ ນັ້ນບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໓໔໕] ສກ. ການຮັບຄຳແນະນຳຈາກຜູ້ອື່ນຂອງພຣະອະຣະຫັນມີແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ເຮົາກ່າວຄວາມສິ້ນໄປແຫ່ງອາສະວະຂອງບຸກຄົນຜູ້ຮູ້ຢູ່ ເຫັນຢູ່ ບໍ່ໄດ້ກ່າວຄວາມສິ້ນໄປແຫ່ງອາສະວະຂອງບຸກຄົນຜູ້ບໍ່ຮູ້ ບໍ່ເຫັນ ເມື່ອບຸກຄົນຮູ້ ເຫັນແນວໃດ ຄວາມສິ້ນໄປແຫ່ງອາສະວະຈຶ່ງມີ ຄື ເມື່ອບຸກຄົນຮູ້ ເຫັນຢູ່ວ່າ ຮູບເປັນດັ່ງນີ້ ฯລฯ ຄວາມດັບແຫ່ງວິນຍານເປັນດັ່ງນີ້ ເມື່ອບຸກຄົນຮູ້ເຫັນແນວນີ້ ຄວາມສິ້ນໄປແຫ່ງອາສະວະຈຶ່ງມີ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ການຮັບຄຳແນະນຳຈາກຜູ້ອື່ນຂອງພຣະອະຣະຫັນມີ"

ສກ. ການຮັບຄຳແນະນຳຈາກຜູ້ອື່ນຂອງພຣະອະຣະຫັນມີແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ເຮົາກ່າວຄວາມສິ້ນໄປແຫ່ງອາສະວະຂອງບຸກຄົນຜູ້ຮູ້ຢູ່ ເຫັນຢູ່ ບໍ່ໄດ້ກ່າວຄວາມສິ້ນໄປແຫ່ງອາສະວະຂອງບຸກຄົນຜູ້ບໍ່ຮູ້ບໍ່ເຫັນ ເມື່ອບຸກຄົນຮູ້ ເຫັນແນວໃດ ຄວາມສິ້ນໄປແຫ່ງອາສະວະຈຶ່ງມີ ຄື ເມື່ອບຸກຄົນຮູ້ເຫັນຢູ່ວ່ານີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ ເມື່ອບຸກຄົນຮູ້ເຫັນແນວນີ້ ຄວາມສິ້ນໄປແຫ່ງອາສະວະຈຶ່ງມີ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ການຮັບຄຳແນະນຳຈາກຜູ້ອື່ນຂອງພຣະອະຣະຫັນມີ"

ສກ. ການຮັບຄຳແນະນຳຈາກຜູ້ອື່ນຂອງພຣະອະຣະຫັນມີແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ບຸກຄົນເມື່ອຍັງບໍ່ຮູ້ຍິ່ງບໍ່ກຳນົດຮູ້ ບໍ່ຄາຍກຳໜັດ ບໍ່ລະສິ່ງທັງປວງ ເປັນຜູ້ບໍ່ຄວນເພື່ອຄວາມສິ້ນທຸກ ແຕ່ບຸກຄົນເມື່ອຮູ້ຍິ່ງ ກຳນົດຮູ້ ຄາຍກຳໜັດ ລະສິ່ງທັງປວງ ເປັນຜູ້ຄວນເພື່ອຄວາມສິ້ນທຸກ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ການຮັບຄຳແນະນຳຈາກຜູ້ອື່ນຂອງພຣະອະຣະຫັນມີ"

ສກ. ການຮັບຄຳແນະນຳຈາກຜູ້ອື່ນຂອງພຣະອະຣະຫັນມີແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພຣະໂສດາບັນລະທຳ ໓ ປະການ ຄືສັກກາຍະທິດຖິ ວິຈິກິດສາ ແລະສີລັບພະຕະປະຣາມາດໄດ້ຢ່າງໝົດສິ້ນແລ້ວ ພ້ອມກັບການບັນລຸໂສດາປັດຕິມັກ ພຣະໂສດາບັນກໍພົ້ນຈາກອະບາຍທັງ ໔ ແລະຈະບໍ່ເຮັດອະພິຖານ ໖" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ການຮັບຄຳແນະນຳຈາກຜູ້ອື່ນຂອງພຣະອະຣະຫັນມີ"

ສກ. ການຮັບຄຳແນະນຳຈາກຜູ້ອື່ນຂອງພຣະອະຣະຫັນມີແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ໃນສະໄໝທີ່ທຳມະຈັກຂຸ ທີ່ປາສະຈາກທຸລີ ປາສະຈາກມົນທິນ ເກີດຂຶ້ນແກ່ອະຣິຍະສາວົກວ່າ "ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດມີຄວາມດັບເປັນທຳມະດາ" ພ້ອມກັບການເກີດຂຶ້ນແຫ່ງໂສດາປັດຕິມັກ ອະຣິຍະສາວົກຍ່ອມລະສັງໂຍດໄດ້ ໓ ປະການ ຄື ສັກກາຍະທິດຖິ ວິຈິກິດສາ ແລະສີລັບພະຕະປະຣາມາດ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ການຮັບຄຳແນະນຳຈາກຜູ້ອື່ນຂອງພຣະອະຣະຫັນມີ"

ສກ. ການຮັບຄຳແນະນຳຈາກຜູ້ອື່ນຂອງພຣະອະຣະຫັນມີແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ໂທຕະກະ ເຮົາບໍ່ອາດຈະປົດເປື້ອງຜູ້ໃດ
ຜູ້ມີຄວາມສົງໄສໃນໂລກໄດ້ ແຕ່ທ່ານເມື່ອຮູ້ທົ່ວເຖິງທຳອັນປະເສີດ
ກໍຈະເພິ່ງຂ້າມໂອຄະໄດ້ເອງດ້ວຍປະການດັ່ງນີ້"

ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ການຮັບຄຳແນະນຳຈາກຜູ້ອື່ນຂອງພຣະອະຣະຫັນມີ"

ປຣ. ທ່ານບໍ່ຍອມຮັບວ່າ "ການຮັບຄຳແນະນຳຈາກຜູ້ອື່ນຂອງພຣະອະຣະຫັນມີ" ແມ່ນບໍ?

ສກ. ແມ່ນ

ປຣ. ຜູ້ອື່ນຈະເພິ່ງແນະນຳນາມແລະໂຄດຂອງສະຕີແລະບຸຣຸດ ທາງແລະບໍ່ແມ່ນທາງ ຊື່ຂອງຫຍ້າ ໄມ້ ແລະຕົ້ນໄມ້ເຈົ້າປ່າແກ່ພຣະອະຣະຫັນໄດ້ແມ່ນບໍ?

ສກ. ແມ່ນ

ປຣ. ຫາກຜູ້ອື່ນຈະເພິ່ງແນະນຳຊື່ແລະໂຄດຂອງສະຕີແລະບຸຣຸດ ທາງແລະບໍ່ແມ່ນທາງ ຊື່ຂອງຫຍ້າ ໄມ້ ແລະຕົ້ນໄມ້ເຈົ້າປ່າແກ່ພຣະອະຣະຫັນໄດ້ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ການຮັບຄຳແນະນຳຈາກຜູ້ອື່ນຂອງພຣະອະຣະຫັນມີ"

ສກ. ຜູ້ອື່ນຈະເພິ່ງແນະນຳຊື່ແລະໂຄດຂອງສະຕີແລະບຸຣຸດ ທາງແລະບໍ່ແມ່ນທາງ ຊື່ຂອງຫຍ້າ ໄມ້ ແລະຕົ້ນໄມ້ເຈົ້າປ່າແກ່ພຣະອະຣະຫັນໄດ້ ດັ່ງນັ້ນ ການຮັບຄຳແນະນຳຈາກຜູ້ອື່ນຂອງ ພຣະອະຣະຫັນຈຶ່ງມີແມ່ນບໍ?

ປຣ. ແມ່ນ

ສກ. ຜູ້ອື່ນຈະເພິ່ງແນະນຳໂສດາປັດຕິຜົນ ສະກະທາຄາມິຜົນ ອະນາຄາມິຜົນ ຫຼືອະຣະຫັດຕະຜົນ ແກ່ພຣະອະຣະຫັນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

**ປະຣະວິຕາຣະນະກະຖາ ຈົບ**

# ໕. ວະຈີເພທະກະຖາ (໑໘)

## ວ່າດ້ວຍການເປ່ງວາຈາ

[໓໘໖] ສກ. ການເປ່ງວາຈາຂອງຜູ້ເຂົ້າຊານມີຢູ່ແມ່ນບໍ?

ປຣ.໑ ແມ່ນ

ສກ. ການເປ່ງວາຈາຂອງຜູ້ເຂົ້າຊານມີຢູ່ໃນໂອກາດທັງປວງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການເປ່ງວາຈາຂອງຜູ້ເຂົ້າຊານມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ການເປ່ງວາຈາຂອງຜູ້ເຂົ້າຊານມີຢູ່ໃນການທັງປວງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການເປ່ງວາຈາຂອງຜູ້ເຂົ້າຊານມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ການເປ່ງວາຈາຂອງຜູ້ເຂົ້າຊານທັງປວງມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການເປ່ງວາຈາຂອງຜູ້ເຂົ້າຊານມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ການເປ່ງວາຈາມີຢູ່ໃນສະມາບັດທັງປວງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການເປ່ງວາຈາຂອງຜູ້ເຂົ້າຊານມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ການເຄື່ອນໄຫວກາຍຂອງຜູ້ເຂົ້າຊານມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການເຄື່ອນໄຫວກາຍຂອງຜູ້ເຂົ້າຊານບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ການເປ່ງວາຈາຂອງຜູ້ເຂົ້າຊານບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວາຈາຂອງຜູ້ເຂົ້າຊານມີຢູ່ ການເປ່ງວາຈາກໍມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ກາຍຂອງຜູ້ເຂົ້າຊານມີຢູ່ ການເຄື່ອນໄຫວກາຍກໍມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກາຍຂອງຜູ້ເຂົ້າຊານມີຢູ່ ການເຄື່ອນໄຫວກາຍບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ວາຈາຂອງຜູ້ເຂົ້າຊານມີຢູ່ (ແຕ່) ການເປ່ງວາຈາບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໓໔໗] ສກ. ເມື່ອຮູ້ວ່າທຸກ ຍ່ອມເປ່ງວາຈາວ່າທຸກແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອຮູ້ວ່າສະມຸໄທ ຍ່ອມເປ່ງວາຈາວ່າສະມຸໄທແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອຮູ້ວ່າທຸກ ຍ່ອມເປ່ງວາຈາວ່າທຸກແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອຮູ້ວ່ານິໂຣດ ຍ່ອມເປ່ງວາຈາວ່ານິໂຣດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອຮູ້ວ່າທຸກ ຍ່ອມເປ່ງວາຈາວ່າທຸກແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອຮູ້ວ່າມັກ ຍ່ອມເປ່ງວາຈາວ່າມັກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອຮູ້ວ່າສະມຸໄທ ແຕ່ບໍ່ເປ່ງວາຈາວ່າສະມຸໄທແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອຮູ້ວ່າທຸກ ແຕ່ບໍ່ເປ່ງວາຈາວ່າທຸກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອຮູ້ວ່ານິໂຣດ ແຕ່ບໍ່ເປ່ງວາຈາວ່ານິໂຣດແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອຮູ້ວ່າທຸກ ແຕ່ບໍ່ເປ່ງວາຈາວ່າທຸກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອຮູ້ວ່າມັກ ແຕ່ບໍ່ເປ່ງວາຈາວ່າມັກແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອຮູ້ວ່າທຸກ ແຕ່ບໍ່ເປ່ງວາຈາວ່າທຸກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໕໘໗] ສກ. ການເປ່ງວາຈາຂອງຜູ້ເຂົ້າຊານ ມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຍານມີສິ່ງໃດເປັນໂຄຈອນ

ປຣ. ຍານມີສັດຈະເປັນໂຄຈອນ

ສກ. ໂສຕະ ມີສັດຈະເປັນໂຄຈອນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການເປ່ງວາຈາຂອງຜູ້ເຂົ້າຊານມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ໂສຕະມີສິ່ງໃດເປັນໂຄຈອນ

ປຣ. ໂສຕະມີສຽງເປັນໂຄຈອນ

ສກ. ຍານມີສຽງເປັນໂຄຈອນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການເປ່ງວາຈາຂອງຜູ້ເຂົ້າຊານມີຢູ່ ຍານມີສັດຈະເປັນໂຄຈອນ ໂສຕະມີສຽງເປັນໂຄຈອນແມ່ນບໍ?

ປຣ. ແມ່ນ

ສກ. ຫາກຍານມີສັດຈະເປັນໂຄຈອນ ໂສຕະມີສຽງເປັນໂຄຈອນ ທ່ານກໍບໍ່ຄວນຍອມຮັບວ່າ "ການເປ່ງວາຈາຂອງຜູ້ເຂົ້າຊານມີຢູ່"

ສກ. ການເປ່ງວາຈາຂອງຜູ້ເຂົ້າຊານມີຢູ່ ຍານມີສັດຈະເປັນໂຄຈອນ ໂສຕະມີສຽງເປັນໂຄຈອນແມ່ນບໍ?

ປຣ. ແມ່ນ

ສກ. ການປະຊຸມແຫ່ງຜັດສະ ໒ ເວທະນາ ໒ ສັນຍາ ໒ ເຈຕະນາ ໒ ຈິດ ໒ ມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໕໘໘] ສກ. ການເປ່ງວາຈາຂອງຜູ້ເຂົ້າຊານມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ການເປ່ງວາຈາຂອງຜູ້ເຂົ້າສະມາບັດທີ່ມີປະຖະວີກະສິນເປັນອາລົມມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການເປ່ງວາຈາຂອງຜູ້ເຂົ້າຊານມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ການເປ່ງວາຈາຂອງຜູ້ເຂົ້າສະມາບັດທີ່ມີອາໂປກະສິນ ຯລຯ ມີເຕໂຊກະສິນ ຯລຯ ມີວາໂຍກະສິນ ຯລຯ ມີນີລະກະສິນ ຯລຯ ມີປີຕະກະສິນ ຯລຯ ມີໂລຫິຕະກະສິນ ຯລຯ ມີໂອທາຕະກະສິນ ຯລຯ ມີອາກາສານັນຈາຍະຕະນະ ຯລຯ ມີວິນຍານັນຈາຍະຕະນະ ຯລຯ ມີອາກິນຈັນຍາຍະຕະນະ ຯລຯ ມີເນວະສັນຍານາສັນຍາຍະຕະນະເປັນອາລົມມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການເປ່ງວາຈາຂອງຜູ້ເຂົ້າສະມາບັດທີ່ມີປະຖະວີກະສິນເປັນອາລົມບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ຫາກການເປ່ງວາຈາຂອງຜູ້ເຂົ້າສະມາບັດທີ່ມີປະຖະວີກະສິນເປັນອາລົມບໍ່ມີ ທ່ານກໍບໍ່ຄວນຍອມຮັບວ່າ "ການເປ່ງວາຈາຂອງຜູ້ເຂົ້າຊານມີຢູ່"

ສກ. ການເປ່ງວາຈາຂອງຜູ້ເຂົ້າສະມາບັດທີ່ມີອາໂປກະສິນ ຯລຯ ມີເຕໂຊກະສິນ ຯລຯ ມີວາໂຍກະສິນ ຯລຯ ມີນີລະກະສິນ ຯລຯ ມີປີຕະກະສິນ ຯລຯ ມີໂລຫິຕະກະສິນ ຯລຯ ມີໂອທາຕະກະສິນ ຯລຯ ມີອາກາສານັນຈາຍະຕະນະ ຯລຯ ມີວິນຍານັນຈາຍະຕະນະ ຯລຯ ມີອາກິນຈັນຍາຍະຕະນະ ຯລຯ ມີເນວະສັນຍານາສັນຍາຍະຕະນະເປັນອາລົມບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ຫາກການເປ່ງວາຈາຂອງຜູ້ເຂົ້າສະມາບັດທີ່ມີເນວະສັນຍານາສັນຍາຍະຕະນະເປັນອາລົມບໍ່ມີ ທ່ານກໍບໍ່ຄວນຍອມຮັບວ່າ "ການເປ່ງວາຈາຂອງຜູ້ເຂົ້າຊານມີຢູ່"

ສກ. ການເປ່ງວາຈາຂອງຜູ້ເຂົ້າຊານມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ການເປ່ງວາຈາຂອງຜູ້ເຂົ້າໂລກິຍະສະມາບັດມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການເປ່ງວາຈາຂອງຜູ້ເຂົ້າຊານມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ການເປ່ງວາຈາຂອງຜູ້ເຂົ້າໂລກິຍະປະຖົມຊານມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການເປ່ງວາຈາຂອງຜູ້ເຂົ້າຊານມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ການເປ່ງວາຈາຂອງຜູ້ເຂົ້າໂລກິຍະທຸຕິຍະຊານ ຯລຯ ຕະຕິຍະຊານ ຯລຯ ຈະຕຸດຖະຊານມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການເປ່ງວາຈາຂອງຜູ້ເຂົ້າໂລກິຍະສະມາບັດບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ຫາກການເປ່ງວາຈາຂອງຜູ້ເຂົ້າໂລກິຍະສະມາບັດບໍ່ມີ ທ່ານກໍບໍ່ຄວນຍອມຮັບວ່າ "ການເປ່ງວາຈາຂອງຜູ້ເຂົ້າຊານມີຢູ່"

ສກ. ການເປ່ງວາຈາຂອງຜູ້ເຂົ້າໂລກິຍະປະຖົມຊານບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ຫາກການເປ່ງວາຈາຂອງຜູ້ເຂົ້າໂລກິຍະປະຖົມຊານບໍ່ມີ ທ່ານກໍບໍ່ຄວນຍອມຮັບວ່າ "ການເປ່ງວາຈາຂອງຜູ້ເຂົ້າຊານມີຢູ່"

ສກ. ການເປ່ງວາຈາຂອງຜູ້ເຂົ້າໂລກິຍະທຸຕິຍະຊານ ຯລຯ ຕະຕິຍະຊານ ຯລຯ ຈະຕຸດຖະຊານບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ຫາກການເປ່ງວາຈາຂອງຜູ້ເຂົ້າໂລກິຍະຈະຕຸດຖະຊານບໍ່ມີ ທ່ານກໍບໍ່ຄວນຍອມຮັບວ່າ "ການເປ່ງວາຈາຂອງຜູ້ເຂົ້າຊານມີຢູ່"

[໓໓໐] ສກ. ການເປ່ງວາຈາຂອງຜູ້ເຂົ້າໂລກຸດຕະຣະປະຖົມຊານມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ການເປ່ງວາຈາຂອງຜູ້ເຂົ້າໂລກິຍະປະຖົມຊານມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການເປ່ງວາຈາຂອງຜູ້ເຂົ້າໂລກຸດຕະຣະປະຖົມຊານມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ການເປ່ງວາຈາຂອງຜູ້ເຂົ້າໂລກິຍະທຸຕິຍະຊານ ຯລຯ ຕະຕິຍະຊານ ຯລຯ ຈະຕຸດຖະຊານ ມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການເປ່ງວາຈາຂອງຜູ້ເຂົ້າໂລກິຍະປະຖົມຊານບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ການເປ່ງວາຈາຂອງຜູ້ເຂົ້າໂລກຸດຕະຣະປະຖົມຊານບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການເປ່ງວາຈາຂອງຜູ້ເຂົ້າໂລກິຍະທຸຕິຍະຊານ ຯລຯ ຕະຕິຍະຊານ ຯລຯ ຈະຕຸດຖະຊານ ບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ການເປ່ງວາຈາຂອງຜູ້ເຂົ້າໂລກຸດຕະຣະປະຖົມຊານບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໓໓໑] ສກ. ການເປ່ງວາຈາຂອງຜູ້ເຂົ້າໂລກຸດຕະຣະປະຖົມຊານມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ການເປ່ງວາຈາຂອງຜູ້ເຂົ້າໂລກຸດຕະຣະທຸຕິຍະຊານມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການເປ່ງວາຈາຂອງຜູ້ເຂົ້າໂລກຸດຕະຣະປະຖົມຊານມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ການເປ່ງວາຈາຂອງຜູ້ເຂົ້າໂລກຸດຕະຣະຕະຕິຍະຊານ ຯລຯ ຈະຕຸດຖະຊານມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການເປ່ງວາຈາຂອງຜູ້ເຂົ້າໂລກຸດຕະຣະທຸຕິຍະຊານບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ການເປ່ງວາຈາຂອງຜູ້ເຂົ້າໂລກຸດຕະຣະປະຖົມຊານບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການເປ່ງວາຈາຂອງຜູ້ເຂົ້າໂລກຸດຕະຣະທຸຕິຍະຊານ ຯລຯ ຕະຕິຍະຊານ ຯລຯ ຈະຕຸດຖະຊານບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ການເປ່ງວາຈາຂອງຜູ້ເຂົ້າໂລກຸດຕະຣະປະຖົມຊານບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໓໑໔] ປຣ. ທ່ານບໍ່ຍອມຮັບວ່າ "ການເປ່ງວາຈາຂອງຜູ້ເຂົ້າຊານມີຢູ່" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະຜູ້ມີພຣະພາກເຈົ້າຕັດວ່າວິຕົກແລະວິຈານເປັນວະຈີສັງຂານ (ເຄື່ອງປຸງແຕ່ງວາຈາ) ວິຕົກແລະວິຈານຂອງຜູ້ເຂົ້າປະຖົມຊານມີຢູ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກພຣະຜູ້ມີພຣະພາກເຈົ້າຕັດວ່າວິຕົກ ແລະວິຈານເປັນວະຈີສັງຂານ ວິຕົກແລະວິຈານຂອງຜູ້ເຂົ້າປະຖົມຊານມີຢູ່ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ການເປ່ງວາຈາຂອງຜູ້ເຂົ້າຊານມີຢູ່"

ສກ. ພຣະຜູ້ມີພຣະພາກເຈົ້າຕັດວ່າວິຕົກ ແລະວິຈານເປັນວະຈີສັງຂານ ວິຕົກແລະວິຈານຂອງຜູ້ເຂົ້າປະຖົມຊານມີຢູ່ ຍ້ອນເຫດນັ້ນ ການເປ່ງວາຈາຂອງຜູ້ນັ້ນຈຶ່ງມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ວິຕົກ ແລະວິຈານຂອງຜູ້ເຂົ້າປະຖົມຊານທີ່ມີປະຖະວີກະສິນເປັນອາລົມມີຢູ່ ການເປ່ງວາຈາຂອງຜູ້ນັ້ນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະຜູ້ມີພຣະພາກເຈົ້າຕັດວ່າວິຕົກ ແລະວິຈານເປັນອະຈິສັງຂານ ວິຕົກແລະວິຈານຂອງຜູ້ເຂົ້າປະຖົມຊານມີຢູ່ ຍ້ອນເຫດນັ້ນ ການເປ່ງວາຈາຂອງຜູ້ນັ້ນຈຶ່ງມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ວິຕົກແລະວິຈານຂອງຜູ້ເຂົ້າປະຖົມຊານທີ່ມີອາໂປກະສິນ ຯລຯ ມີເຕໂຊກະສິນ ຯລຯ ມີວາໂຍກະສິນ ຯລຯ ມີນີລະກະສິນ ຯລຯ ມີປີຕະກະສິນ ຯລຯ ມີໂລຫິຕະກະສິນ ຯລຯ ມີໂອທາຕະກະສິນເປັນອາລົມມີຢູ່ ການເປ່ງວາຈາຂອງຜູ້ນັ້ນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ທ່ານບໍ່ຍອມຮັບວ່າ “ການເປ່ງວາຈາຂອງຜູ້ເຂົ້າຊານມີຢູ່” ແມ່ນບໍ?

ສກ. ແມ່ນ

ປຣ. ພຣະຜູ້ມີພຣະພາກເຈົ້າຕັດວ່າວາຈາມີວິຕົກເປັນສະມຸດຖານ ວິຕົກແລະວິຈານຂອງຜູ້ເຂົ້າປະຖົມຊານມີຢູ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກພຣະຜູ້ມີພຣະພາກເຈົ້າຕັດວ່າວາຈາມີວິຕົກເປັນສະມຸດຖານ ວິຕົກແລະວິຈານຂອງຜູ້ເຂົ້າປະຖົມຊານມີຢູ່ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ “ການເປ່ງວາຈາຂອງຜູ້ເຂົ້າຊານມີຢູ່”

ສກ. ພຣະຜູ້ມີພຣະພາກເຈົ້າຕັດວ່າວາຈາມີວິຕົກເປັນສະມຸດຖານ ວິຕົກແລະວິຈານຂອງຜູ້ເຂົ້າປະຖົມຊານມີຢູ່ ຍ້ອນເຫດນັ້ນ ການເປ່ງວາຈາຂອງຜູ້ນັ້ນຈຶ່ງມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະຜູ້ມີພຣະພາກເຈົ້າຕັດວ່າວາຈາມີສັນຍາເປັນສະມຸດຖານ ສັນຍາຂອງຜູ້ເຂົ້າທຸຕິຍະຊານມີຢູ່ ວິຕົກແລະວິຈານຂອງຜູ້ນັ້ນຈຶ່ງມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະຜູ້ພຣະພາກເຈົ້າຕັດວ່າວາຈາມີວິຕົກເປັນສະມຸດຖານ ວິຕົກແລະວິຈານຂອງຜູ້ເຂົ້າປະຖົມຊານມີຢູ່ ຍ້ອນເຫດນັ້ນ ການເປ່ງວາຈາຂອງຜູ້ນັ້ນຈຶ່ງມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະຜູ້ມີພຣະພາກເຈົ້າຕັດວ່າວາຈາມີສັນຍາເປັນສະມຸດຖານ ສັນຍາຂອງຜູ້ເຂົ້າ

ຕະຕິຍະຊານ ຯລຯ ຈະຕຸດຖະຊານ ຯລຯ ອາກາສານັນຈາຍະຕະນະ ຯລຯ ວິນຍານັນຈາຍະຕະນະ ຯລຯ ອາກິນຈັນຍາຍະຕະນະ ມີຢູ່ ວິຕົກແລະວິຈານຂອງຜູ້ນັ້ນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໑໑] ສກ. ການເປ່ງວາຈາຂອງຜູ້ເຂົ້າຊານມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ວ່າ “ການເປ່ງວາຈາຂອງຜູ້ເຂົ້າປະຖົມຊານດັບໄປ” ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະສູດທີ່ວ່າ "ການເປ່ງວາຈາຂອງຜູ້ເຂົ້າປະຖົມຊານດັບໄປ" ມີຢູ່ຈິງ ທ່ານກໍບໍ່ຄວນຍອມຮັບວ່າ "ການເປ່ງວາຈາຂອງຜູ້ເຂົ້າຊານມີຢູ່"

ສກ. ພຣະສູດທີ່ວ່າ "ການເປ່ງວາຈາຂອງຜູ້ເຂົ້າປະຖົມຊານດັບໄປ" ມີຢູ່ຈິງ ຍ້ອນເຫດນັ້ນ ການເປ່ງວາຈາຂອງຜູ້ນັ້ນຈຶ່ງມີຢູ່ ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ວ່າ "ວິຕົກແລະວິຈານຂອງຜູ້ເຂົ້າທຸຕິຍະຊານດັບໄປ" ມີຢູ່ຈິງ ຍ້ອນເຫດນັ້ນ ວິຕົກແລະວິຈານຂອງຜູ້ນັ້ນຈຶ່ງມີຢູ່ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະສູດທີ່ວ່າ "ການເປ່ງວາຈາຂອງຜູ້ເຂົ້າປະຖົມຊານດັບໄປ" ມີຢູ່ຈິງ ຍ້ອນເຫດນັ້ນ ການເປ່ງວາຈາຂອງຜູ້ນັ້ນຈຶ່ງມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ວ່າ "ປີຕິຂອງຜູ້ເຂົ້າຕະຕິຍະຊານດັບໄປ ລົມອັດສາສະປັດສາສະຂອງຜູ້ເຂົ້າຈະຕຸດຖະຊານດັບໄປ ຮູບສັນຍາຂອງຜູ້ເຂົ້າອາກາສານັນຈາຍະຕະນະດັບໄປ ອາກາສານັນຈາຍະຕະນະສັນຍາຂອງຜູ້ເຂົ້າວິນຍານັນຈາຍະຕະນະດັບໄປ ວິນຍານັນຈາຍະຕະນະສັນຍາຂອງຜູ້ເຂົ້າອາກິນຈັນຍາຍະຕະນະດັບໄປ ອາກິນຈັນຍາຍະຕະນະສັນຍາຂອງຜູ້ເຂົ້າເນວະສັນຍານາສັນຍາຍະຕະນະດັບໄປ ສັນຍາແລະເວທະນາຂອງຜູ້ເຂົ້າສັນຍາເວທະຍິດນິໂຣດດັບໄປ" ມີຢູ່ຈິງ ຍ້ອນເຫດນັ້ນ ສັນຍາແລະເວທະນາຂອງຜູ້ເຂົ້າສັນຍາເວທະຍິດນິໂຣດນັ້ນຈຶ່ງມີຢູ່ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ທ່ານບໍ່ຍອມຮັບວ່າ "ການເປ່ງວາຈາຂອງຜູ້ເຂົ້າຊານມີຢູ່" ແມ່ນບໍ?

ສກ. ແມ່ນ

ປຣ. ສຽງພຣະຜູ້ມີພຣະພາກເຈົ້າຕັດວ່າເປັນປໍລະປັກຕໍ່ປະຖົມຊານ໌ ບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກພຣະຜູ້ມີພຣະພາກເຈົ້າຕັດວ່າສຽງເປັນປໍລະປັກຕໍ່ປະຖົມຊານ ຍ້ອນເຫດນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ການເປ່ງວາຈາຂອງຜູ້ເຂົ້າຊານມີຢູ່"

ສກ. ພຣະຜູ້ມີພຣະພາກເຈົ້າຕັດວ່າສຽງເປັນປໍລະປັກຕໍ່ປະຖົມຊານ ຍ້ອນເຫດນັ້ນ ການເປ່ງວາຈາຂອງຜູ້ເຂົ້າຊານຈຶ່ງມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະຜູ້ມີພຣະພາກເຈົ້າຕັດວ່າວິຕົກ ແລະວິຈານເປັນປໍລະປັກຕໍ່ທຸຕິຍະຊານ ຯລຯ ຕັດວ່າປີຕິເປັນປໍລະປັກຕໍ່ຕະຕິຍະຊານ ຕັດວ່າລົມອັດສາສະປັດສາສະເປັນປໍລະປັກຕໍ່ຈະຕຸດຖະຊານ ຕັດວ່າຮູບສັນຍາເປັນປໍລະປັກຕໍ່ຜູ້ເຂົ້າອາກາສານັນຈາຍະຕະນະ ຕັດວ່າອາກາສານັນຈາຍະຕະນະສັນຍາເປັນປໍລະປັກຕໍ່ຜູ້ເຂົ້າວິນຍານັນຈາຍະຕະນະ ຕັດວ່າວິນຍານັນຈາຍະຕະນະ

ສັນຍາເປັນປໍລະປັກຕໍ່ຜູ້ເຂົ້າອາກິນຈັນຍາຍະຕະນະ ຕັດວ່າອາກິນຈັນຍາຍະຕະນະສັນຍາເປັນປໍລະປັກຕໍ່ຜູ້ເຂົ້າເນວະສັນຍານາສັນຍາຍະຕະນະ ຕັດວ່າສັນຍາແລະເວທະນາເປັນປໍລະປັກຕໍ່ຜູ້ເຂົ້າສັນຍາເວທະຍິດນິໂຣດ ສັນຍາແລະເວທະນາຂອງຜູ້ເຂົ້າສັນຍາເວທະຍິດນິໂຣດນັ້ນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ປຣ. ທ່ານບໍ່ຍອມຮັບວ່າ "ການເປ່ງວາຈາຂອງຜູ້ເຂົ້າຊານມີຢູ່" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ອານົນ ສາວົກຊື່ວ່າອະພິພູຂອງພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະນາມວ່າສິຂີ ສະຖິດຢູ່ໃນພົມມະໂລກ ໄດ້ປະກາດໃຫ້ໝື່ນຈັກກະວານຮູ້ດ້ວຍສຽງວ່າ

ທ່ານທັງຫຼາຍຈົ່ງຜາຣົບຄວາມພຽນ
ຈົ່ງທຳຄວາມພຽນຢ່າຢຸດ
ຈົ່ງປະກອບຄວາມພຽນໃນພຣະພຸດທະສາດສະໜາ
ຈົ່ງກຳຈັດກອງທັບແຫ່ງມັດຈຸ
ເໝືອນຊ້າງກຳຈັດເຮືອນຕົ້ນອໍ້
ຜູ້ທີ່ບໍ່ຜະໝາດຢູ່ໃນພຣະທຳວິໄນນີ້
ລະການວຽນວ່າຍຕາຍເກີດແລ້ວ
ຈັກເຮັດບ່ອນສຸດແຫ່ງທຸກໄດ້"
ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ການເປ່ງວາຈາຂອງຜູ້ເຂົ້າຊານຈຶ່ງມີຢູ່

## ໖. ທຸກຂາຫາຣະກະຖາ (໑໘)

## ວ່າດ້ວຍທຸກຂາຫາຣະຍານ

[໖໖໘] ສກ. ການກ່າວວ່າ "ທຸກ" ເປັນອົງຂອງມັກ ນັບເນື່ອງໃນມັກແມ່ນບໍ?

ປຣ. ແມ່ນ

ສກ. ທຸກຄົນທີ່ກ່າວວ່າ "ທຸກ" ຊື່ວ່າຈະເລີນມັກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ທຸກຄົນທີ່ກ່າວວ່າ "ທຸກ" ຊື່ວ່າຈະເລີນມັກແມ່ນບໍ?

ປຣ. ແມ່ນ

ສກ. ພານປຸຖຸຊົນທີ່ກ່າວວ່າ "ທຸກ" ຊື່ວ່າຈະເລີນມັກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຜູ້ຂ້າມານດາ ຯລຯ ຂ້າບິດາ ຯລຯ ຂ້າພຣະອະຣະຫັນ ຯລຯ ທຳຮ້າຍພຣະພຸດທະເຈົ້າຈົນເຖິງພຣະໂລຫິດຫໍ້ ຯລຯ ທຳສົງໃຫ້ແຕກກັນກ່າວວ່າ "ທຸກ" ຊື່ວ່າ ຈະເລີນມັກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

**ທຸກຂາຫາຣະກະຖາ ຈົບ**

## ໗. ຈິດຕັດຖິຕິກະຖາ (໑໖)

## ວ່າດ້ວຍຄວາມຕັ້ງຢູ່ແຫ່ງຈິດ

[໓໓໕] ສກ. ຈິດດວງດຽວຕັ້ງຢູ່ໄດ້ຕະຫຼອດວັນແມ່ນບໍ?

ປຣ. ແມ່ນ

ສກ. ເຄິ່ງວັນເປັນຂະນະເກີດຂຶ້ນ (ຂອງຈິດ) ອີກເຄິ່ງວັນເປັນຂະນະດັບ (ຂອງຈິດ) ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈິດດວງດຽວຕັ້ງຢູ່ໄດ້ຕະຫຼອດ ໒ ວັນແມ່ນບໍ?

ປຣ. ແມ່ນ

ສກ. ວັນໜຶ່ງເປັນຂະນະເກີດຂຶ້ນ (ຂອງຈິດ) ອີກວັນໜຶ່ງເປັນຂະນະດັບ (ຂອງຈິດ) ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈິດດວງດຽວຕັ້ງຢູ່ໄດ້ຕະຫຼອດ ໔ ວັນ ຯລຯ ໘ ວັນ ຯລຯ ໑໐ ວັນ ຯລຯ ໒໐ ວັນ ຯລຯ ໑ ເດືອນ ຯລຯ ໒ ເດືອນ ຯລຯ ໔ ເດືອນ ຯລຯ ໘ ເດືອນ ຯລຯ ໑໐ ເດືອນ ຯລຯ ໑ ປີ ຯລຯ ໒ ປີ ຯລຯ ໔ ປີ ຯລຯ ໘ ປີ ຯລຯ ໑໐ ປີ ຯລຯ ໓໐ ປີ ຯລຯ ໔໐ ປີ ຯລຯ ໕໐ ປີ ຯລຯ ໑໐໐ ປີ ຯລຯ ໒໐໐ ປີ ຯລຯ ໔໐໐ ປີ ຯລຯ ໕໐໐ ປີ ຯລຯ ໑,໐໐໐ ປີ ຯລຯ ໒,໐໐໐ ປີ ຯລຯ ໔,໐໐໐ ປີ ຯລຯ ໘,໐໐໐ ປີ ຯລຯ ໑໖,໐໐໐ ປີ ຯລຯ ໑ ກັບ ຯລຯ ໒ ກັບ ຯລຯ ໔ ກັບ ຯລຯ ໘ ກັບ ຯລຯ ໑໖ ກັບ ຯລຯ ໓໒ ກັບ ຯລຯ ໖໔ ກັບ ຯລຯ ໕໐໐ ກັບ ຯລຯ ໑,໐໐໐ ກັບ ຯລຯ ໒,໐໐໐ ກັບ ຯລຯ ໔,໐໐໐ ກັບ ຯລຯ ໘,໐໐໐ ກັບ ຯລຯ ໑໖,໐໐໐ ກັບ ຯລຯ ໒໐,໐໐໐ ກັບ ຯລຯ ໔໐,໐໐໐ ກັບ ຯລຯ ໖໐,໐໐໐ ກັບ ຯລຯ ໘໔,໐໐໐ ກັບ ແມ່ນບໍ?

ປຣ. ແມ່ນ

ສກ. ໔໔,໐໐໐ ກັບ ເປັນຂະນະເກີດຂຶ້ນ (ຂອງຈິດ) ອີກ ໔໔,໐໐໐ ກັບເປັນຂະນະດັບ (ຂອງຈິດ) ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ຈິດດວງດຽວຕັ້ງຢູ່ໄດ້ຕະຫຼອດທັງວັນແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳອື່ນ ໆ ທີ່ເກີດຂຶ້ນແລ້ວດັບໄປຫຼາຍຄັ້ງໃນວັນໜຶ່ງມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳເຫຼົ່ານັ້ນປ່ຽນແປງໄດ້ໄວກວ່າຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ສະພາວະທຳເຫຼົ່ານັ້ນປ່ຽນແປງໄດ້ໄວກວ່າຈິດແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ເຮົາບໍ່ເຫັນສະພາວະທຳອື່ນແມ່ນຢ່າງໜຶ່ງທີ່ປ່ຽນແປງໄດ້ໄວເໝືອນຈິດນີ້ ຈິດນີ້ປ່ຽນແປງໄດ້ໄວຈົນປຽບທຽບກັບສິ່ງໃດບໍ່ໄດ້ງ່າຍ ໆ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ສະພາວະທຳເຫຼົ່ານັ້ນ ປ່ຽນແປງໄດ້ໄວກວ່າຈິດ"

ສກ. ສະພາວະທຳເຫຼົ່ານັ້ນປ່ຽນແປງໄດ້ໄວກວ່າຈິດແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ຕະຖາຄົດຮຽກສິ່ງນີ້ວ່າ ຈິດແດ່ ມະໂນແດ່ ວິນຍານແດ່ ຈິດເປັນຕົ້ນນັ້ນ ດວງໜຶ່ງເກີດຂຶ້ນ ອີກດວງໜຶ່ງດັບໄປ ຕະຫຼອດທັງຄືນແລະວັນ ປຽບເໝືອນລິງເມື່ອທ່ຽວໄປໃນປ່ານ້ອຍແລະປ່າໃຫຍ່ ໂດດຈັບງ່າໄມ້ ປ່ອຍງ່ານັ້ນແລ້ວຈັບງ່າອື່ນ ປ່ອຍງ່າອື່ນແລ້ວຈັບງ່າອື່ນຕໍ່ໄປຢູ່ແນວນັ້ນ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ສະພາວະທຳເຫຼົ່ານັ້ນປ່ຽນແປງໄດ້ໄວກວ່າຈິດ"

[໕໕໖] ສກ. ຈິດດວງດຽວຕັ້ງຢູ່ໄດ້ຕະຫຼອດທັງວັນແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂຸວິນຍານຕັ້ງຢູ່ໄດ້ຕະຫຼອດທັງວັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ໂສຕະວິນຍານໆລໆ ຄານະວິນຍານໆລໆ ຊິວຫາວິນຍານໆລໆ ກາຍະວິນຍານ ໆລໆ ຈິດທີ່ເປັນອະກຸສົນ ໆລໆ ຈິດທີ່ປະກອບດ້ວຍຣາຄະ ໆລໆ ທີ່ປະກອບດ້ວຍໂທສະ ໆລໆ ທີ່ປະກອບດ້ວຍໂມຫະ ໆລໆ ທີ່ປະກອບດ້ວຍມານະ ໆລໆ ທີ່ປະກອບດ້ວຍທິດຖິ ໆລໆ ທີ່ປະກອບ

ດ້ວຍວິຈິກິດສາ ຯລຯ ທີ່ປະກອບດ້ວຍຖີນະ ຯລຯ ທີ່ປະກອບດ້ວຍອຸດທັດຈະ ຯລຯ ທີ່ປະກອບດ້ວຍອະຫິຣິກະ ຯລຯ ທີ່ປະກອບດ້ວຍອະໂນດຕັບປະ ຕັ້ງຢູ່ໄດ້ຕະຫຼອດທັງວັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈິດດວງດຽວຕັ້ງຢູ່ໄດ້ຕະຫຼອດທັງວັນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນເຫັນຮູບທາງຕາດ້ວຍຈິດດວງໃດ ຟັງສຽງທາງຫູດ້ວຍຈິດດວງນັ້ນ ຯລຯ ດົມກິ່ນທາງດັງ ຯລຯ ຊີມຣົດທາງລີ້ນ ຯລຯ ຖືກຕ້ອງໂຜດຖັບພະທາງກາຍ ຯລຯ ຮູ້ແຈ້ງທຳມາຣົມທາງໃຈ ຯລຯ ຮູ້ແຈ້ງທຳມາຣົມທາງໃຈດ້ວຍຈິດດວງໃດ ຍ່ອມເຫັນຮູບທາງຕາດ້ວຍຈິດດວງນັ້ນ ຯລຯ ຟັງສຽງທາງຫູ ຯລຯ ດົມກິ່ນທາງດັງ ຯລຯ ຊີມຣົດທາງລີ້ນ ຯລຯ ຖືກຕ້ອງໂຜດຖັບພະທາງກາຍດ້ວຍຈິດດວງດຽວກັນນັ້ນນັ້ນເອງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈິດດວງດຽວຕັ້ງຢູ່ໄດ້ຕະຫຼອດທັງວັນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນກ້າວໄປດ້ວຍຈິດດວງໃດ ຍ່ອມຖອຍກັບດ້ວຍຈິດດວງນັ້ນ ຖອຍກັບດ້ວຍ ຈິດດວງໃດ ຍ່ອມກ້າວໄປດ້ວຍຈິດດວງນັ້ນ ແລເບິ່ງດ້ວຍຈິດດວງໃດ ຍ່ອມຫຼຽວເບິ່ງດ້ວຍຈິດດວງນັ້ນ ຫຼຽວເບິ່ງດ້ວຍຈິດດວງໃດ ຍ່ອມແລເບິ່ງດ້ວຍຈິດດວງນັ້ນ ຄູ້ເຂົ້າດ້ວຍຈິດດວງໃດ ຍ່ອມຢຽດອອກດ້ວຍຈິດດວງນັ້ນ ຢຽດອອກດ້ວຍຈິດດວງໃດ ຍ່ອມຄູ້ເຂົ້າດ້ວຍຈິດດວງນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໓໓໗] ສກ. ເຫຼົ່າເທບຜູ້ເຂົ້າເຖິງຊັ້ນອາກາສານັນຈາຍະຕະນະພົບ ມີຈິດດວງດຽວ ຕັ້ງຢູ່ໄດ້ຈົນຕະຫຼອດອາຍຸແມ່ນບໍ?

ປຣ. ແມ່ນ

ສກ. ເຫຼົ່າມະນຸດມີຈິດດວງດຽວຕັ້ງຢູ່ໄດ້ຈົນຕະຫຼອດອາຍຸແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເຫຼົ່າເທບຜູ້ເຂົ້າເຖິງຊັ້ນອາກາສານັນຈາຍະຕະນະພົບມີຈິດດວງດຽວ ຕັ້ງຢູ່ໄດ້ຈົນຕະຫຼອດອາຍຸແມ່ນບໍ?

ປຣ. ແມ່ນ

ສກ. ເຫຼົ່າເທບຊັ້ນຈາຕຸມະຫາຣາດ ຯລຯ ຊັ້ນຕາວະຕິງສາ ຯລຯ ຊັ້ນຍາມາ ຯລຯ ຊັ້ນດຸສິດ ຯລຯ ຊັ້ນນິມມານະຣະດີ ຯລຯ ຊັ້ນປະຣະນິມມິຕະວະສະວັດດີ ຯລຯ ຊັ້ນພົມປາຣິສັດຊາ ຯລຯ ຊັ້ນພົມປຸໂຣຫິຕາ ຯລຯ ຊັ້ນມະຫາພົມມາ ຯລຯ ຊັ້ນປະຣິດຕາພາ ຯລຯ ຊັ້ນອັບປະມານາພາ ຯລຯ ຊັ້ນອາພັດສະຣາ ຯລຯ ຊັ້ນປະຣິດຕະສຸພາ ຯລຯ ຊັ້ນອັບປະມານະສຸພາ ຯລຯ ຊັ້ນສຸພະກິນຫາ ຯລຯ ຊັ້ນເວຫັບຜະລາ ຯລຯ ຊັ້ນອະວິຫາ ຯລຯ ຊັ້ນອະຕັບປາ ຯລຯ ຊັ້ນ

ສຸທັດສາ ຯລຯ ຊັ້ນສຸທັດສີ ຯລຯ ຊັ້ນອະກະນິດຖາ ມີຈິດດວງດຽວຕັ້ງຢູ່ໄດ້ຈົນຕະຫຼອດອາຍຸ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເຫຼົ່າເທບຜູ້ເຂົ້າເຖິງຊັ້ນອາກາສານັນຈາຍະຕະນະພົບມີປະມານອາຍຸ ໒໐,໐໐໐ ກັບ ກໍມີຈິດດວງດຽວຕັ້ງຢູ່ໄດ້ຕະຫຼອດ ໒໐,໐໐໐ ກັບແມ່ນບໍ?

ປຣ. ແມ່ນ

ສກ. ເຫຼົ່າມະນຸດມີປະມານອາຍຸ ໑໐໐ ປີ ກໍມີຈິດດວງດຽວຕັ້ງຢູ່ໄດ້ຕະຫຼອດ ໑໐໐ ປີ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເຫຼົ່າເທບຜູ້ເຂົ້າເຖິງຊັ້ນອາກາສານັນຈາຍະຕະນະພົບ ມີປະມານອາຍຸ ໒໐,໐໐໐ ກັບ ກໍມີຈິດດວງດຽວຕັ້ງຢູ່ໄດ້ຕະຫຼອດ ໒໐,໐໐໐ ກັບແມ່ນບໍ?

ປຣ. ແມ່ນ

ສກ. ເຫຼົ່າເທບຊັ້ນຈາຕຸມະຫາຣາດມີປະມານອາຍຸ ໕໐໐ ປີ ກໍມີຈິດດວງດຽວຕັ້ງຢູ່ໄດ້ ຕະຫຼອດ ໕໐໐ ປີ ຯລຯ ເຫຼົ່າເທບຊັ້ນຕາວະຕິງສາ ຯລຯ ຕັ້ງຢູ່ໄດ້ຕະຫຼອດ ໑,໐໐໐ ປີ ຯລຯ ເຫຼົ່າເທບຊັ້ນຍາມາ ຯລຯ ຕັ້ງຢູ່ໄດ້ຕະຫຼອດ ໒,໐໐໐ ປີ ຯລຯ ເຫຼົ່າເທບຊັ້ນດຸສິດ ຯລຯ ຕັ້ງຢູ່ໄດ້ຕະຫຼອດ ໔,໐໐໐ ປີ ຯລຯ ເຫຼົ່າເທບຊັ້ນນິມມານະຣະດີ ຯລຯ ຕັ້ງຢູ່ໄດ້ຕະຫຼອດ ໘,໐໐໐ ປີ ຯລຯ ເຫຼົ່າເທບຊັ້ນປະຣະນິມມິຕະວະສະວັດດີ ຯລຯ ຕັ້ງຢູ່ໄດ້ຕະຫຼອດ ໑໖,໐໐໐ ປີ ຯລຯ ເຫຼົ່າເທບຊັ້ນພົມປາຣິສັດຊາ ຯລຯ ຕັ້ງຢູ່ໄດ້ຕະຫຼອດ ໑ ໃນ ໓ ຂອງກັບ ຯລຯ ເຫຼົ່າເທບຊັ້ນ ພົມປຸໂຣຫິຕາ ຯລຯ ຕັ້ງຢູ່ໄດ້ຕະຫຼອດເຄິ່ງກັບ ຯລຯ ເຫຼົ່າເທບຊັ້ນມະຫາພົມມາ ຯລຯ ຕັ້ງຢູ່ໄດ້ຕະຫຼອດ ໑ ກັບ ຯລຯ ເຫຼົ່າເທບຊັ້ນປະຣິດຕາພາ ຯລຯ ຕັ້ງຢູ່ໄດ້ຕະຫຼອດ ໒ ກັບ ຯລຯ ເຫຼົ່າເທບຊັ້ນອັບປະມານາພາ ຯລຯ ຕັ້ງຢູ່ໄດ້ຕະຫຼອດ ໔ ກັບ ຯລຯ ເຫຼົ່າເທບຊັ້ນອາພັດສະຣາ ຯລຯ ຕັ້ງຢູ່ໄດ້ຕະຫຼອດ ໘ ກັບ ຯລຯ ເຫຼົ່າເທບຊັ້ນປະຣິດຕະສຸພາ ຯລຯ ຕັ້ງຢູ່ໄດ້ຕະຫຼອດ ໑໖ ກັບ ຯລຯ ເຫຼົ່າເທບຊັ້ນອັບປະມານະສຸພາ ຯລຯ ຕັ້ງຢູ່ໄດ້ຕະຫຼອດ ໓໒ ກັບ ຯລຯ ເຫຼົ່າເທບຊັ້ນສຸພະກິນຫາ ຯລຯ ຕັ້ງຢູ່ໄດ້ຕະຫຼອດ ໖໔ ກັບ ຯລຯ ເຫຼົ່າເທບຊັ້ນເວຫັບຜະລາ ຯລຯ ຕັ້ງຢູ່ໄດ້ຕະຫຼອດ ໕໐໐ ກັບ ຯລຯ ເຫຼົ່າເທບຊັ້ນອະວິຫາ ຯລຯ ຕັ້ງຢູ່ໄດ້ຕະຫຼອດ ໑,໐໐໐ ກັບ ຯລຯ ເຫຼົ່າເທບຊັ້ນອະຕັບປາ ຯລຯ ຕັ້ງຢູ່ໄດ້ຕະຫຼອດ ໒,໐໐໐ ກັບ ຯລຯ ເຫຼົ່າເທບຊັ້ນສຸທັດສາ ຯລຯ ຕັ້ງຢູ່ໄດ້ຕະຫຼອດ ໔,໐໐໐ ກັບ ຯລຯ ເຫຼົ່າເທບຊັ້ນສຸທັດສີ ຯລຯ ຕັ້ງຢູ່ໄດ້ຕະຫຼອດ ໘,໐໐໐ ກັບ ຯລຯ ເຫຼົ່າເທບຊັ້ນອະກະນິດຖາມີປະມານອາຍຸ ໑໖,໐໐໐ ກັບ ກໍມີຈິດດວງດຽວຕັ້ງຢູ່ໄດ້ຕະຫຼອດ ໑໖,໐໐໐ ກັບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ເຫຼົ່າເທບຜູ້ເຂົ້າເຖິງຊັ້ນອາກາສານັນຈາຍະຕະນະພົບ ມີຈິດເກີດດັບເປັນໄລຍະ ໆ ແມ່ນບໍ?

ສກ. ແມ່ນ

ປຣ. ເຫຼົ່າເທບຜູ້ເຂົ້າເຖິງຊັ້ນອາກາສານັນຈາຍະຕະນະພົບ ຈຸຕິປະຕິສົນທິເປັນໄລຍະ ໆ ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ເຫຼົ່າເທບຜູ້ເຂົ້າເຖິງຊັ້ນອາກາສານັນຈາຍະຕະນະພົບ ມີຈິດດວງດຽວຕັ້ງຢູ່ໄດ້ຈົນຕະຫຼອດອາຍຸແມ່ນບໍ?

ປຣ. ແມ່ນ

ສກ. ເຫຼົ່າເທບຜູ້ເຂົ້າເຖິງຊັ້ນອາກາສານັນຈາຍະຕະນະພົບ ປະຕິສົນທິດ້ວຍຈິດດວງໃດ ຍ່ອມຈຸຕິດ້ວຍຈິດດວງນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

**ຈິດຕັດຖິຕິກະຖາ ຈົບ**

## ๙. ກຸກກຸນະກະຖາ (໑ກ)

## ວ່າດ້ວຍຂອງຮ້ອນ

[໖໖๙] ສກ. ສັງຂານທັງປວງເປັນເໝືອນຂອງຮ້ອນໂດຍບໍ່ຈຳກັດແມ່ນບໍ?

ປຣ.໑ ແມ່ນ

ສກ. ສຸກຂະເວທະນາ ສຸກທາງກາຍ ສຸກທາງໃຈ ທິບພະສຸກ ສຸກຂອງມະນຸດ ສຸກໃນລາບ ສຸກໃນສັກກາຣະ ສຸກໃນການໄປ ສຸກໃນການນອນ ສຸກໃນຄວາມມີອຳນາດ ສຸກໃນຄວາມເປັນໃຫຍ່ ສຸກຂອງຄະລິຫັດ ສຸກຂອງສະມະນະ ສຸກມີອາສະວະ ສຸກບໍ່ມີອາສະວະ ສຸກມີອຸປະທິ ສຸກບໍ່ມີອຸປະທິ ສຸກເຈືອອາມິດ ສຸກບໍ່ເຈືອອາມິດ ສຸກມີປີຕິ ສຸກບໍ່ມີປີຕິ ສຸກໃນຊານ ສຸກອັນເກີດຈາກວິມຸດຕິ ສຸກໃນກາມ ສຸກໃນເນກຂຳມະ ສຸກອັນເກີດຈາກວິເວກ ສຸກອັນເກີດຈາກຄວາມສະງົບ ສຸກອັນເກີດ ຈາກຄວາມຕັດສະຣູ້ ມີຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກສຸກຂະເວທະນາ ฯລฯ ສຸກອັນເກີດຈາກຄວາມຕັດສະຣູ້ມີຢູ່ ທ່ານກໍບໍ່ຄວນຍອມຮັບວ່າ “ສັງຂານທັງປວງເປັນເໝືອນຂອງຮ້ອນໂດຍບໍ່ຈຳກັດ”

ສກ. ສັງຂານທັງປວງເປັນເໝືອນຂອງຮ້ອນໂດຍບໍ່ຈຳກັດແມ່ນບໍ?

ປຣ. ແມ່ນ

ສກ. ສັງຂານທັງປວງເປັນທຸກຂະເວທະນາ ທຸກທາງກາຍ ທຸກທາງໃຈ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ປຣ. ທ່ານບໍ່ຍອມຮັບວ່າ "ສັງຂານທັງປວງເປັນເໝືອນຂອງຮ້ອນໂດຍບໍ່ຈຳກັດ" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ສິ່ງທັງປວງເປັນຂອງຮ້ອນ ກໍອັນໃດນໍ? ຊື່ວ່າສິ່ງທັງປວງເປັນຂອງຮ້ອນ ພິກຂຸທັງຫຼາຍ ຈັກຂຸເປັນຂອງຮ້ອນ ຮູບເປັນຂອງຮ້ອນ ຈັກຂຸວິນຍານເປັນຂອງຮ້ອນ ຈັກຂຸສຳຜັດເປັນຂອງຮ້ອນ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼືບໍ່ແມ່ນສຸກບໍ່ແມ່ນທຸກ ທີ່ເກີດຂຶ້ນເພາະຈັກຂຸສຳຜັດເປັນປັດໄຈກໍເປັນຂອງຮ້ອນ ຮ້ອນເພາະອັນໃດ? ເຮົາກ່າວວ່າຮ້ອນຍ້ອນໄຟຄືຣາຄະ ຍ້ອນໄຟຄືໂທສະ ຍ້ອນໄຟຄືໂມຫະ ຮ້ອນຍ້ອນຊາດ ຍ້ອນຊະຣາ ຍ້ອນມໍຣະນະ ຍ້ອນໂສກະ ຍ້ອນປະຣິເທວະ ຍ້ອນທຸກ ຍ້ອນໂທມະນັດ ຍ້ອນອຸປາຍາດ

ໂສຕະ (ຫູ) ເປັນຂອງຮ້ອນ ສຽງເປັນຂອງຮ້ອນ ฯลฯ ຄານະ (ດັງ) ເປັນຂອງຮ້ອນ ກິ່ນເປັນຂອງຮ້ອນ ฯลฯ ຊິວຫາ (ລີ້ນ) ເປັນຂອງຮ້ອນ ຣົດເປັນຂອງຮ້ອນ ฯลฯ ກາຍເປັນຂອງຮ້ອນ ໂຜດຖັບພະເປັນຂອງຮ້ອນ ฯลฯ ມະໂນ (ໃຈ) ເປັນຂອງຮ້ອນ ທຳມາຣົມເປັນຂອງຮ້ອນ ມະໂນວິນຍານເປັນຂອງຮ້ອນ ມະໂນສຳຜັດເປັນຂອງຮ້ອນ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼືທີ່ບໍ່ແມ່ນສຸກບໍ່ແມ່ນທຸກ ທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈ ກໍເປັນຂອງຮ້ອນ ຮ້ອນຍ້ອນອັນໃດ? ເຮົາກ່າວວ່າຮ້ອນຍ້ອນໄຟຄືຣາຄະ ຍ້ອນໄຟຄືໂທສະ ຍ້ອນໄຟຄືໂມຫະ ຮ້ອນຍ້ອນຊາດ ຍ້ອນຊະຣາ ຍ້ອນມໍຣະນະ ຍ້ອນໂສກະ ຍ້ອນປະຣິເທວະ ຍ້ອນທຸກ ຍ້ອນໂທມະນັດ ຍ້ອນອຸປາຍາດ" ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ສັງຂານທັງປວງເປັນເໝືອນຂອງຮ້ອນໂດຍບໍ່ຈຳກັດ"

ສກ. ສັງຂານທັງປວງເປັນເໝືອນຂອງຮ້ອນໂດຍບໍ່ຈຳກັດແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ກາມມະຄຸນມີ ໕ ປະການນີ້ ກາມມະຄຸນ ໕ ປະການ ອັນໃດແດ່ ຄື (໑) ຮູບທີ່ເພິ່ງຮູ້ແຈ້ງທາງຕາທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ (໒) ສຽງທີ່ເພິ່ງຮູ້ແຈ້ງທາງຫູ ฯลฯ (໓) ກິ່ນທີ່ເພິ່ງຮູ້ແຈ້ງທາງດັງ ฯลฯ (໔) ຣົດທີ່ເພິ່ງຮູ້ແຈ້ງທາງລີ້ນ ฯลฯ (໕)

ໂຜດຖືບພະທີ່ເພິ່ງຮູ້ແຈ້ງທາງກາຍທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກໍາໜັດ ພິກຂຸທັງຫຼາຍ ກາມມະຄຸນມີ ໕ ປະການນີ້" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ສັງຂານທັງປວງເປັນເໝືອນຂອງຮ້ອນໂດຍບໍ່ຈໍາກັດ"

ປຣ. ທ່ານບໍ່ຍອມຮັບວ່າ "ສັງຂານທັງປວງເປັນເໝືອນຂອງຮ້ອນໂດຍບໍ່ຈໍາກັດ" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ເປັນລາບຂອງທ່ານທັງຫຼາຍ ທ່ານທັງຫຼາຍໄດ້ດີແລ້ວທີ່ທ່ານທັງຫຼາຍໄດ້ໂອກາດເພື່ອປະພຶດພົມມະຈັນ ເຮົາເຫັນນະຣົກຊື່ວ່າຜັດສາຍະຕະນິກະ ໖ ຂຸມແລ້ວ ໃນນະຣົກ ໖ ຂຸມນັ້ນ ສັດຍ່ອມເຫັນຮູບແນວໃດແນວໜຶ່ງທາງຕາໄດ້ ແຕ່ເຫັນໄດ້ສະເພາະຮູບທີ່ບໍ່ໜ້າປາຖະໜາ ບໍ່ເຫັນຮູບທີ່ໜ້າປາຖະໜາ ເຫັນໄດ້ສະເພາະຮູບທີ່ບໍ່ໜ້າຕ້ອງການ ບໍ່ເຫັນຮູບທີ່ໜ້າຕ້ອງການ ເຫັນໄດ້ສະເພາະຮູບທີ່ບໍ່ໜ້າພໍໃຈ ບໍ່ເຫັນຮູບທີ່ໜ້າພໍໃຈ ຟັງສຽງແນວໃດແນວໜຶ່ງທາງຫູໄດ້ ຯລຯ ດົມກິ່ນແນວໃດແນວໜຶ່ງທາງດັງໄດ້ ຯລຯ ຊີມຣົດແນວໃດແນວໜຶ່ງທາງລີ້ນໄດ້ ຯລຯ ຖືກຕ້ອງໂຜດຖັບພະແນວໃດແນວໜຶ່ງທາງກາຍໄດ້ ຯລຯ ຮູ້ແຈ້ງທໍາມາຣົມແນວໃດແນວໜຶ່ງທາງໃຈໄດ້ ແຕ່ຮູ້ແຈ້ງໄດ້ສະເພາະທໍາມາຣົມທີ່ບໍ່ໜ້າປາຖະໜາ ບໍ່ຮູ້ແຈ້ງທໍາມາຣົມທີ່ໜ້າປາຖະໜາ ຮູ້ແຈ້ງໄດ້ສະເພາະທໍາມາຣົມທີ່ບໍ່ໜ້າຕ້ອງການ ບໍ່ຮູ້ແຈ້ງທໍາມາຣົມທີ່ໜ້າຕ້ອງ ການຮູ້ແຈ້ງໄດ້ສະເພາະທໍາມາຣົມທີ່ບໍ່ໜ້າພໍໃຈ ບໍ່ຮູ້ແຈ້ງທໍາມາຣົມທີ່ໜ້າພໍໃຈ" ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ສັງຂານທັງປວງເປັນເໝືອນຂອງຮ້ອນໂດຍບໍ່ຈໍາກັດ"

ສກ. ສັງຂານທັງປວງເປັນເໝືອນຂອງຮ້ອນໂດຍບໍ່ຈໍາກັດແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ເປັນລາບຂອງທ່ານທັງຫຼາຍ ທ່ານທັງຫຼາຍໄດ້ດີແລ້ວທີ່ທ່ານທັງຫຼາຍໄດ້ໂອກາດເພື່ອປະພຶດພົມມະຈັນ ເຮົາໄດ້ເຫັນສະຫວັນ ຊື່ວ່າຜັດສາຍະຕະນິກະ ໖ ຊັ້ນແລ້ວ ໃນສະຫວັນ ໖ ຊັ້ນນັ້ນ ບຸກຄົນຍ່ອມເຫັນຮູບແນວໃດແນວໜຶ່ງທາງຕາໄດ້ ແຕ່ເຫັນໄດ້ສະເພາະຮູບທີ່ໜ້າປາຖະໜາ ບໍ່ເຫັນຮູບທີ່ບໍ່ໜ້າປາຖະໜາ ເຫັນໄດ້ສະເພາະຮູບທີ່ໜ້າຕ້ອງການ ບໍ່ເຫັນຮູບທີ່ບໍ່ໜ້າຕ້ອງການ ເຫັນໄດ້ສະເພາະຮູບທີ່ໜ້າພໍໃຈ ບໍ່ເຫັນຮູບທີ່ບໍ່ໜ້າພໍໃຈ

ຟັງສຽງແນວໃດແນວໜຶ່ງທາງຫູໄດ້ ຯລຯ

ດົມກິ່ນແນວໃດແນວໜຶ່ງທາງດັງໄດ້ ຯລຯ

ຊີມຣົດແນວໃດແນວໜຶ່ງທາງລີ້ນໄດ້ ຯລຯ

ຖືກຕ້ອງໂຜດຖັບພະແນວໃດແນວໜຶ່ງທາງກາຍໄດ້ ຯລຯ

ຮູ້ແຈ້ງທຳມາຣົມແນວໃດແນວໜຶ່ງທາງໃຈໄດ້ ແຕ່ຮູ້ແຈ້ງໄດ້ສະເພາະທຳມາຣົມທີ່ໜ້າປາຖະໜາ ບໍ່ຮູ້ແຈ້ງທຳມາຣົມທີ່ບໍ່ໜ້າປາຖະໜາ ຮູ້ແຈ້ງໄດ້ສະເພາະທຳມາຣົມທີ່ໜ້າຕ້ອງການ ບໍ່ຮູ້ແຈ້ງທຳມາຣົມທີ່ບໍ່ໜ້າຕ້ອງການ ຮູ້ແຈ້ງໄດ້ສະເພາະທຳມາຣົມທີ່ໜ້າພໍໃຈ ບໍ່ຮູ້ແຈ້ງທຳມາຣົມທີ່ບໍ່ໜ້າພໍໃຈ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ສັງຂານທັງປວງເປັນເໝືອນຂອງຮ້ອນໂດຍບໍ່ຈຳກັດ

ປຣ. ທ່ານບໍ່ຍອມຮັບວ່າ "ສັງຂານທັງປວງເປັນເໝືອນຂອງຮ້ອນໂດຍບໍ່ຈຳກັດ" ແມ່ນບໍ?

ສກ. ແມ່ນ

ປຣ. ສິ່ງໃດບໍ່ທ່ຽງ ສິ່ງນັ້ນພຣະຜູ້ມີພຣະພາກເຈົ້າຕັດວ່າເປັນທຸກ ສັງຂານທັງປວງບໍ່ທ່ຽງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກສິ່ງໃດບໍ່ທ່ຽງ ສິ່ງນັ້ນພຣະຜູ້ມີພຣະພາກເຈົ້າຕັດວ່າເປັນທຸກ ສັງຂານທັງປວງບໍ່ທ່ຽງ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ສັງຂານທັງປວງເປັນເໝືອນຂອງຮ້ອນໂດຍບໍ່ຈຳກັດ"

ສກ. ສັງຂານທັງປວງເປັນເໝືອນຂອງຮ້ອນໂດຍບໍ່ຈຳກັດແມ່ນບໍ?

ປຣ. ແມ່ນ

ສກ. ທານມີຜົນບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ເປັນທີ່ເພິ່ງພໍໃຈ ມີຜົນຮ້ອນຮົນ ມີທຸກເປັນກຳໄລ ມີທຸກເປັນວິບາກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສີນ ຯລຯ ອຸໂປສົດ ຯລຯ ພາວະນາ ຯລຯ ພົມມະຈັນ ມີຜົນບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ເປັນທີ່ເພິ່ງພໍໃຈ ມີຜົນຮ້ອນຮົນ ມີທຸກເປັນກຳໄລ ມີທຸກເປັນວິບາກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ທານມີຜົນໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ມີຜົນເຢືອກເຢັນ ມີສຸກເປັນກຳໄລ ມີສຸກເປັນວິບາກບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກທານມີຜົນໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ມີຜົນເຢືອກເຢັນ ມີສຸກເປັນກຳໄລ ມີສຸກເປັນວິບາກ ທ່ານກໍບໍ່ຄວນຍອມຮັບວ່າ "ສັງຂານທັງປວງເປັນເໝືອນຂອງຮ້ອນໂດຍບໍ່ຈຳກັດ"

ສກ. ສິນ ໆລໆ ອຸໂປສົດ ໆລໆ ພາວະນາ ໆລໆ ພົມມະຈັນ ມີຜົນໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ມີຜົນເຢືອກເຢັນ ມີສຸກເປັນກຳໄລ ມີສຸກເປັນວິບາກບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພົມມະຈັນມີຜົນໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ມີຜົນເຢືອກເຢັນມີສຸກເປັນກຳໄລ ມີສຸກເປັນວິບາກ ທ່ານກໍບໍ່ຄວນຍອມຮັບວ່າ"ສັງຂານທັງປວງເປັນເໝືອນ ຂອງຮ້ອນໂດຍບໍ່ຈຳກັດ"

ສກ. ສັງຂານທັງປວງເປັນເໝືອນຂອງຮ້ອນໂດຍບໍ່ຈຳກັດແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ວິເວກເປັນຄວາມສຸກຂອງຜູ້ສັນໂດດ
ຜູ້ມີທຳຜາກົດແລ້ວ ຜູ້ເຫັນຢູ່
ຄວາມບໍ່ບຽດບຽນຄືຄວາມສັງລວມໃນສັດທັງຫຼາຍເປັນສຸກໃນໂລກ
ຄວາມເປັນຜູ້ປາສະຈາກຣາຄະ
ຄືຄວາມລ່ວງການທັງຫຼາຍໄດ້ ເປັນສຸກໃນໂລກ
ຄວາມກຳຈັດອັດສະມິມານະໄດ້ ເປັນສຸກຢ່າງຍິ່ງ
ສຸກຍິ່ງກວ່າສຸກນັ້ນເຮົາໄດ້ເຖິງແລ້ວ ນັ້ນເປັນສຸກຢ່າງຍິ່ງ
ວິດຊາ ໓ ເຮົາໄດ້ບັນລຸໂດຍລຳດັບແລ້ວ
ນັ້ນແລເປັນສຸກຢ່າງຍິ່ງ"

ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ສັງຂານທັງປວງເປັນເໝືອນຂອງຮ້ອນໂດຍບໍ່ຈຳກັດ"

**ກຸກກຸນະກະຖາ ຈົບ**

## ໙. ອະນຸປຸບພາພິສະມະຍະກະຖາ (໑໗)

## ວ່າດ້ວຍການບັນລຸທຳໂດຍລຳດັບ

[໓໓໙] ສກ. ມີການບັນລຸທຳໂດຍລຳດັບແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຈະເລີນໂສດາປັດຕິມັກໄດ້ໂດຍລຳດັບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຈະເລີນໂສດາປັດຕິມັກໄດ້ໂດຍລໍາດັບແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນເຮັດໃຫ້ແຈ້ງໂສດາປັດຕິຜົນໄດ້ໂດຍລໍາດັບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ມີການບັນລຸທໍາໂດຍລໍາດັບແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຈະເລີນສະກະທາຄາມິມັກໄດ້ໂດຍລໍາດັບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຈະເລີນສະກະທາຄາມິມັກໄດ້ໂດຍລໍາດັບແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນເຮັດໃຫ້ແຈ້ງສະກະທາຄາມິຜົນໄດ້ໂດຍລໍາດັບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ມີການບັນລຸທໍາໂດຍລໍາດັບແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຈະເລີນອະນາຄາມິມັກໄດ້ໂດຍລໍາດັບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຈະເລີນອະນາຄາມິມັກໄດ້ໂດຍລໍາດັບແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນເຮັດໃຫ້ແຈ້ງອະນາຄາມິຜົນໄດ້ໂດຍລໍາດັບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ມີການບັນລຸທໍາໂດຍລໍາດັບແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຈະເລີນອະຣະຫັດຕະມັກໄດ້ໂດຍລໍາດັບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຈະເລີນອະຣະຫັດຕະມັກໄດ້ໂດຍລໍາດັບແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນເຮັດໃຫ້ແຈ້ງອະຣະຫັດຕະຜົນໄດ້ໂດຍລໍາດັບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໓໔໐] ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ ລະສິ່ງໃດໄດ້ດ້ວຍການເຫັນທຸກ

ປຣ. ລະສັກກາຍະທິດຖິ ວິຈິກິດສາ ສີລັບພະຕະປະຣາມາດ ແລະກິເລດທີ່ມີຢູ່ໃນຈິດດວງດຽວກັນກັບກິເລດທັງ ໓ ນັ້ນໄດ້ ໑ ໃນ ໔ ສ່ວນ

ສກ. ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ເປັນພຣະໂສດາບັນ ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ບໍ່ເປັນພຣະໂສດາບັນ ເມື່ອລະກິເສດໄດ້ ໑ ໃນ ໔ ສ່ວນ ທ່ານເຖິງ ໄດ້ ບັນລຸ ເຮັດໃຫ້ແຈ້ງ ເຂົ້າເຖິງຢູ່ ສຳຜັດໂສດາປັດຕິຜົນດ້ວຍກາຍ ຢູ່ ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ບໍ່ສຳຜັດໂສດາປັດຕິຜົນດ້ວຍກາຍຢູ່ ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ເປັນພຣະໂສດາບັນຜູ້ສັດຕັກຂັດຕຸປະຣະມະ ໂກລັງໂກລະ ເອກະພິຊີ ປະກອບດ້ວຍຄວາມເຫຼື້ອມໃສທີ່ບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າ ຯລຯ ໃນພຣະທຳ ຯລຯ ໃນພຣະສົງ ຯລຯ ປະກອບດ້ວຍສີນທີ່ພຣະອະຣິຍະພໍໃຈ ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ບໍ່ປະກອບດ້ວຍສີນທີ່ພຣະອະຣິຍະພໍໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ ລະສິ່ງໃດໄດ້ດ້ວຍການເຫັນສະມຸໄທ ຯລຯ ດ້ວຍການເຫັນນິໂຣດ ຯລຯ ດ້ວຍການເຫັນມັກ

ປຣ. ລະສັກກາຍະທິດຖິ ວິຈິກິດສາ ສີລັບພະຕະປະຣາມາດ ແລະກິເລດທີ່ມີຢູ່ໃນຈິດດວງດຽວກັນກັບກິເລດທັງ ໓ ນັ້ນໄດ້ ໑ ໃນ ໔ ສ່ວນ

ສກ. ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ເປັນພຣະໂສດາບັນ ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ບໍ່ເປັນພຣະໂສດາບັນ ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ທ່ານເຖິງ ໄດ້ ບັນລຸ ເຮັດໃຫ້ແຈ້ງ ເຂົ້າເຖິງຢູ່ ສຳຜັດໂສດາປັດຕິຜົນດ້ວຍກາຍຢູ່ ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ບໍ່ສຳຜັດໂສດາປັດຕິຜົນດ້ວຍກາຍຢູ່ ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ເປັນພຣະໂສດາບັນຜູ້ສັດຕັກຂັດຕຸປະຣະມະ ໂກລັງໂກລະ ເອກະພິຊີ ປະກອບດ້ວຍຄວາມເຫຼື້ອມໃສທີ່ບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າ ຯລຯ ໃນພຣະທຳ ຯລຯ ໃນພຣະສົງ ຯລຯ ປະກອບດ້ວຍສີນທີ່ພຣະອະຣິຍະພໍໃຈ ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ບໍ່ປະກອບດ້ວຍສີນທີ່ພຣະອະຣິຍະພໍໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໓໔໑] ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມິຜົນ ລະສິ່ງໃດໄດ້ດ້ວຍການເຫັນທຸກ

ປຣ. ລະກາມຣາຄະ ພະຍາບາດຢ່າງຫຍາບ ແລະກິເລດທີ່ມີຢູ່ໃນຈິດດວງດຽວກັນກັບກິເລດທັງ ໒ ນັ້ນໄດ້ ໑ ໃນ ໔ ສ່ວນ

ສກ. ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ເປັນພຣະສະກະທາຄາມີ ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ບໍ່ເປັນພຣະສະກະທາຄາມີ ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ທ່ານເຖິງ ໄດ້ ບັນລຸ ເຮັດໃຫ້ແຈ້ງ ເຂົ້າເຖິງຢູ່ ສຳຜັດສະກະທາຄາມິຜົນດ້ວຍກາຍຢູ່ ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ບໍ່ສຳຜັດສະກະທາຄາມິຜົນດ້ວຍກາຍຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມິຜົນ ລະສິ່ງໃດໄດ້ດ້ວຍການເຫັນສະມຸໄທ ຯລຯ ດ້ວຍການເຫັນນິໂຣດ ຯລຯ ດ້ວຍການເຫັນມັກ

ປຣ. ລະກາມຣາຄະຢ່າງຫຍາບ ພະຍາບາດຢ່າງຫຍາບ ແລະກິເລດທີ່ມີຢູ່ໃນຈິດດວງດຽວກັນກັບກິເລດທັງ ໔ ນັ້ນໄດ້ ໑ ໃນ ໔ ສ່ວນ

ສກ. ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ເປັນພຣະສະກະທາຄາມີ ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ບໍ່ເປັນພຣະສະກະທາຄາມີ ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ທ່ານເຖິງ ໄດ້ ບັນລຸ ເຮັດໃຫ້ແຈ້ງ ເຂົ້າເຖິງຢູ່ ສຳຜັດສະກະທາຄາມິຜົນດ້ວຍກາຍຢູ່ ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ບໍ່ສຳຜັດສະກະທາຄາມິຜົນດ້ວຍກາຍຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໓໔໘] ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນລະສິ່ງໃດໄດ້ດ້ວຍການເຫັນທຸກ

ປຣ. ລະກາມຣາຄະຢ່າງລະອຽດ ພະຍາບາດຢ່າງລະອຽດ ແລະກິເລດທີ່ມີຢູ່ໃນຈິດດວງດຽວກັນກັບກິເລດທັງ ໔ ນັ້ນໄດ້ ໑ ໃນ ໔ ສ່ວນ

ສກ. ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ເປັນພຣະອະນາຄາມີ ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ບໍ່ເປັນພຣະອະນາຄາມີ ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ທ່ານເຖິງ ໄດ້ ບັນລຸ ເຮັດໃຫ້ແຈ້ງ ເຂົ້າເຖິງຢູ່ ສຳຜັດອະນາຄາມິຜົນດ້ວຍກາຍຢູ່ ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ບໍ່ສຳຜັດອະນາຄາມິຜົນດ້ວຍກາຍຢູ່ ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ເປັນພຣະອະນາຄາມີ ຜູ້ອັນຕະຣາປະຣິນິບພາຍີ ຯລຯ ຜູ້ອຸປະຫັດຈະປະຣິນິບພາຍີ ຯລຯ ຜູ້ອະສັງຂາຣະປະຣິນິບພາຍີ ຯລຯ ຜູ້ສະສັງຂາຣະປະຣິນິບພາຍີ ຯລຯ ຜູ້ອຸດທັງໂສໂຕອະກະນິດຖະຄາມີ ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ບໍ່ເປັນພຣະອະນາຄາມີຜູ້ອຸດທັງໂສໂຕອະກະນິດຖະຄາມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນລະສິ່ງໃດໄດ້ດ້ວຍການເຫັນສະມຸໄທ ຯລຯ ດ້ວຍການເຫັນນິໂຣດ ຯລຯ ດ້ວຍການເຫັນມັກ

ປຣ. ລະກາມຣາຄະຢ່າງລະອຽດ ພະຍາບາດຢ່າງລະອຽດ ແລະກິເລດທີ່ມີຢູ່ໃນຈິດດວງດຽວກັນກັບກິເລດທັງ ໔ ນັ້ນໄດ້ ໑ ໃນ ໔ ສ່ວນ

ສກ. ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ເປັນພຣະອະນາຄາມີ ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ບໍ່ເປັນພຣະອະນາຄາມີ ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ທ່ານເຖິງ ໄດ້ ບັນລຸ ເຮັດໃຫ້ແຈ້ງ ເຂົ້າເຖິງຢູ່ ສຳຜັດອະນາຄາມິຜົນດ້ວຍກາຍຢູ່ ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ບໍ່ສຳຜັດອະນາຄາມິຜົນດ້ວຍກາຍຢູ່ ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ເປັນພຣະອະນາຄາມີຜູ້ອັນຕະຣາປະຣິນິບພາຍີ ຯລຯ ຜູ້ອຸປະຫັດຈະປະຣິນິບພາຍີ ຯລຯ ຜູ້ອະສັງຂາຣະປະຣິນິບພາຍີ

ຯລຯ ຜູ້ສະສັງຂາຣະປະຣິນິບພາຍີ ຯລຯ ຜູ້ອຸດທັງໂສໂຕອະກະນິດຖະຄາມີ ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ບໍ່ເປັນພຣະອະນາຄາມີຜູ້ອຸດທັງໂສໂຕອະກະນິດຖະຄາມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໓໔໓] ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນລະສິ່ງໃດໄດ້ດ້ວຍການເຫັນທຸກ

ປຣ. ລະຣູບປະຣາຄະ ອະຣູບປະຣາຄະ ມານະ ອຸດທັດຈະ ອະວິດຊາ ແລະກິເລດທີ່ມີຢູ່ໃນຈິດດວງດຽວກັນກັບກິເລດທັງ ໕ ນັ້ນໄດ້ ໑ ໃນ ໔ ສ່ວນ

ສກ. ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ເປັນພຣະອະຣະຫັນ ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ບໍ່ເປັນພຣະອະຣະຫັນ ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ທ່ານເຖິງ ໄດ້ ບັນລຸ ເຮັດໃຫ້ແຈ້ງ ເຂົ້າເຖິງຢູ່ ສຳຜັດອະຣະຫັດຕະຜົນດ້ວຍກາຍຢູ່ ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ບໍ່ສຳຜັດອະຣະຫັດຕະຜົນດ້ວຍກາຍຢູ່ ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ເປັນຜູ້ປາສະຈາກຣາຄະ ຯລຯ ໂທສະ ຯລຯ ໂມຫະ ຯລຯ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາລະແລ້ວ ບັນລຸປະໂຫຍດຕົນແລ້ວ ໝົດສິ້ນກິເລດເປັນເຄື່ອງຜູກສັດໄວ້ໃນພົບແລ້ວ ລຸດພົ້ນຍ້ອນຮູ້ຊອບ ຖອດຫຼີ້ມສະລັກ ຖົມຄູ ຖອນເສົາຣະນຽດໄດ້ແລ້ວ ບໍ່ມີບານປະຕູ ເປັນພຣະອະຣິຍະ ປົດທຸງ ຄືມານະ ວາງພາລະຄືຂັນ ໝົດເຄື່ອງຜູກພັນ ຊະນະຢ່າງວິເສດແລ້ວ ທ່ານກຳນົດຮູ້ທຸກ ລະສະມຸໄທ ເຮັດໃຫ້ແຈ້ງນິໂຣດ ຈະເລີນມັກແລ້ວ ຮູ້ຍິ່ງທຳທີ່ຄວນຮູ້ຍິ່ງ ກຳນົດຮູ້ທຳທີ່ຄວນກຳນົດຮູ້ ລະທຳທີ່ຄວນລະ ຈະເລີນທຳທີ່ຄວນຈະເລີນ ຯລຯ ເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງ ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ບໍ່ເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນລະສິ່ງໃດໄດ້ດ້ວຍການເຫັນສະມຸໄທ ຯລຯ ດ້ວຍການເຫັນນິໂຣດ ຯລຯ ດ້ວຍການເຫັນມັກ

ປຣ. ລະຣູບປະຣາຄະ ອະຣູບປະຣາຄະ ມານະ ອຸດທັດຈະ ອະວິດຊາ ແລະກິເລດທີ່ມີຢູ່ໃນຈິດດວງດຽວກັນກັບກິເລດທັງ ໕ ນັ້ນໄດ້ ໑ ໃນ ໔ ສ່ວນ

ສກ. ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ເປັນພຣະອະຣະຫັນ ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ບໍ່ເປັນພຣະອະຣະຫັນ ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ທ່ານເຖິງ ໄດ້ ບັນລຸ ເຮັດໃຫ້ແຈ້ງ ເຂົ້າເຖິງຢູ່ ສຳຜັດອະຣະຫັດຕະຜົນດ້ວຍກາຍຢູ່ ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ບໍ່ສຳຜັດອະຣະຫັດຕະຜົນດ້ວຍກາຍຢູ່ ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ເປັນຜູ້ປາສະຈາກຣາຄະ ຯລຯ ໂທສະ ຯລຯ ໂມຫະ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາລະແລ້ວ ບັນລຸປະໂຫຍດຕົນແລ້ວ ໝົດສິ້ນກິເລດເຄື່ອງຜູກສັດໄວ້ໃນພົບແລ້ວ ລຸດພົ້ນຍ້ອນຮູ້ຊອບ ຖອດຫຼີ້ມສະລັກ ຖົມຄູ ຖອນເສົາຣະນຽດໄດ້ແລ້ວ ບໍ່ມີບານປະຕູ ເປັນພຣະອະຣິຍະ ປົດທຸງຄືມານະ ວາງພາລະຄືຂັນ ໝົດເຄື່ອງຜູກພັນ ຊະນະຢ່າງວິເສດແລ້ວ ທ່ານກຳນົດຮູ້ທຸກ ລະສະມຸໄທ ເຮັດໃຫ້ແຈ້ງນິໂຣດ

ຈະເລີນມັກແລ້ວ ຮູ້ຍິ່ງທຳທີ່ຄວນຮູ້ຍິ່ງ ກຳນົດຮູ້ທຳທີ່ຄວນກຳນົດຮູ້ ລະທຳທີ່ຄວນລະ ຈະເລີນທຳທີ່ຄວນຈະເລີນ ຯລຯ ເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງ ເມື່ອລະກິເລດໄດ້ ໑ ໃນ ໔ ສ່ວນ ບໍ່ເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໓໔໔] ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ ເມື່ອເຫັນທຸກ ທ່ານຈຶ່ງຍອມຮັບວ່າ "ເປັນຜູ້ປະຕິບັດ" ແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອເຫັນທຸກແລ້ວ ທ່ານຈຶ່ງຍອມຮັບວ່າ "ເປັນຜູ້ຕັ້ງຢູ່ໃນຜົນ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອເຫັນສະມຸໄທ ຯລຯ ເມື່ອເຫັນນິໂຣດ ທ່ານຈຶ່ງຍອມຮັບວ່າ "ເປັນຜູ້ປະຕິບັດ" ແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອເຫັນນິໂຣດແລ້ວ ທ່ານຈຶ່ງຍອມຮັບວ່າ "ເປັນຜູ້ຕັ້ງຢູ່ໃນຜົນ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ ເມື່ອເຫັນມັກ ທ່ານຈຶ່ງຍອມຮັບວ່າ "ເປັນຜູ້ປະຕິບັດ" ເມື່ອເຫັນມັກແລ້ວ ທ່ານຈຶ່ງຍອມຮັບວ່າ "ເປັນຜູ້ຕັ້ງຢູ່ໃນຜົນ" ແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອເຫັນທຸກ ທ່ານຈຶ່ງຍອມຮັບວ່າ "ເປັນຜູ້ປະຕິບັດ" ເມື່ອເຫັນທຸກແລ້ວ ທ່ານຈຶ່ງຍອມຮັບວ່າ "ເປັນຜູ້ຕັ້ງຢູ່ໃນຜົນ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອເຫັນມັກ ທ່ານຈຶ່ງຍອມຮັບວ່າ "ເປັນຜູ້ປະຕິບັດ" ເມື່ອເຫັນມັກແລ້ວ ທ່ານຈຶ່ງຍອມຮັບວ່າ "ເປັນຜູ້ຕັ້ງຢູ່ໃນຜົນ" ແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອເຫັນສະມຸໄທ ຯລຯ ເມື່ອເຫັນນິໂຣດ ທ່ານຈຶ່ງຍອມຮັບວ່າ "ເປັນຜູ້ປະຕິບັດ" ເມື່ອເຫັນນິໂຣດແລ້ວ ທ່ານຈຶ່ງຍອມຮັບວ່າ "ເປັນຜູ້ຕັ້ງຢູ່ໃນຜົນ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ ເມື່ອເຫັນທຸກ ທ່ານຈຶ່ງຍອມຮັບວ່າ "ເປັນຜູ້ປະຕິບັດ" ເມື່ອເຫັນທຸກແລ້ວ ທ່ານບໍ່ຍອມຮັບວ່າ "ຂ້າພະເຈົ້າຍອມຮັບວ່າ ເປັນຜູ້ຕັ້ງຢູ່ໃນຜົນ" ແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອເຫັນມັກ ທ່ານຈຶ່ງຍອມຮັບວ່າ “ເປັນຜູ້ປະຕິບັດ” ເມື່ອເຫັນມັກແລ້ວ ທ່ານບໍ່ຍອມຮັບວ່າ “ຂ້າພະເຈົ້າຍອມຮັບວ່າ ເປັນຜູ້ຕັ້ງຢູ່ໃນຜົນ” ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ເມື່ອເຫັນສະມຸໄທ ฯລฯ ເມື່ອເຫັນນິໂຣດ ທ່ານຈຶ່ງຍອມຮັບວ່າ “ເປັນຜູ້ປະຕິບັດ” ເມື່ອເຫັນນິໂຣທະສັດແລ້ວ ທ່ານບໍ່ຍອມຮັບວ່າ “ຂ້າພະເຈົ້າຍອມຮັບວ່າ ເປັນຜູ້ຕັ້ງຢູ່ໃນຜົນ” ແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອເຫັນມັກ ທ່ານຈຶ່ງຍອມຮັບວ່າ “ເປັນຜູ້ປະຕິບັດ” ເມື່ອເຫັນມັກແລ້ວ ທ່ານບໍ່ຍອມຮັບວ່າ “ຂ້າພະເຈົ້າຍອມຮັບວ່າ ເປັນຜູ້ຕັ້ງຢູ່ໃນຜົນ” ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ ເມື່ອເຫັນທຸກ ທ່ານຈຶ່ງຍອມຮັບວ່າ “ເປັນຜູ້ປະຕິບັດ” ເມື່ອເຫັນທຸກແລ້ວ ທ່ານບໍ່ຍອມຮັບວ່າ “ຂ້າພະເຈົ້າຍອມຮັບວ່າ ເປັນຜູ້ຕັ້ງຢູ່ໃນຜົນ” ແມ່ນບໍ?

ປຣ. ແມ່ນ

ສກ. ການເຫັນທຸກ ບໍ່ມີປະໂຫຍດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ເມື່ອເຫັນສະມຸໄທ ฯລฯ ເມື່ອເຫັນນິໂຣດ ທ່ານຈຶ່ງຍອມຮັບວ່າ “ເປັນຜູ້ປະຕິບັດ” ເມື່ອເຫັນນິໂຣດແລ້ວ ທ່ານບໍ່ຍອມຮັບວ່າ “ຂ້າພະເຈົ້າຍອມຮັບວ່າ ເປັນຜູ້ຕັ້ງຢູ່ໃນຜົນ” ແມ່ນບໍ?

ປຣ. ແມ່ນ

ສກ. ການເຫັນນິໂຣດ ບໍ່ມີປະໂຫຍດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໓໔໕] ປຣ. ເມື່ອເຫັນທຸກແລ້ວກໍເປັນອັນເຫັນສັດຈະ ໔ ແມ່ນບໍ?

ສກ. ແມ່ນ

ປຣ. ທຸກຂະສັດເປັນສັດຈະ ໔ ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ເມື່ອເຫັນຮູບຂັນໂດຍຄວາມເປັນສະພາວະບໍ່ທ່ຽງແລ້ວ ກໍເປັນອັນເຫັນຂັນ ໕ ໂດຍຄວາມເປັນສະພາວະບໍ່ທ່ຽງແມ່ນບໍ?

ປຣ. ແມ່ນ

ສກ. ຮູບຂັນເປັນຂັນ ໕ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ເມື່ອເຫັນຈັກຂາຍະຕະນະໂດຍຄວາມເປັນສະພາວະບໍ່ທ່ຽງແລ້ວ ກໍເປັນອັນເຫັນອາຍະຕະນະ ໑໔ ໂດຍຄວາມເປັນສະພາວະບໍ່ທ່ຽງແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂາຍະຕະນະເປັນອາຍະຕະນະ ໑໔ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ເມື່ອເຫັນຈັກຂຸທາດໂດຍຄວາມເປັນສະພາວະບໍ່ທ່ຽງແລ້ວ ກໍເປັນອັນເຫັນທາດ ໑໗ ໂດຍຄວາມເປັນສະພາວະບໍ່ທ່ຽງແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂຸທາດເປັນທາດ ໑໗ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ເມື່ອເຫັນຈັກຂຸນຊີໂດຍຄວາມເປັນສະພາວະບໍ່ທ່ຽງແລ້ວ ກໍເປັນອັນເຫັນອິນຊີ ໔໔ ໂດຍຄວາມເປັນສະພາວະບໍ່ທ່ຽງແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂຸນຊີເປັນອິນຊີ ໔໔ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ບຸກຄົນຍ່ອມເຮັດໃຫ້ແຈ້ງໂສດາປັດຕິຜົນດ້ວຍຍານ ໔ ແມ່ນບໍ?

ປຣ. ແມ່ນ

ສກ. ໂສດາປັດຕິຜົນມີ ໔ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ບຸກຄົນຍ່ອມເຮັດໃຫ້ແຈ້ງໂສດາປັດຕິຜົນດ້ວຍຍານ ໗ ແມ່ນບໍ?

ປຣ. ແມ່ນ

ສກ. ໂສດາປັດຕິຜົນມີ ໗ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ບຸກຄົນຍ່ອມເຮັດໃຫ້ແຈ້ງໂສດາປັດຕິຜົນດ້ວຍຍານ ໑໔ ແມ່ນບໍ?

ປຣ. ແມ່ນ

ສກ. ໂສດາປັດຕິຜົນມີ ໑໔ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ບຸກຄົນຍ່ອມເຮັດໃຫ້ແຈ້ງໂສດາປັດຕິຜົນດ້ວຍຍານ ໔໔ ແມ່ນບໍ?

ປຣ. ແມ່ນ

ສກ. ໂສດາປັດຕິຜົນມີ ໔໔ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ບຸກຄົນເຮັດໃຫ້ແຈ້ງໂສດາປັດຕິຜົນດ້ວຍຍານ ໆໆ ແມ່ນບໍ?

ປຣ. ແມ່ນ

ສກ. ໂສດາປັດຕິຜົນມີ ໆໆ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໓໔໖] ປຣ. ທ່ານບໍ່ຍອມຮັບວ່າ "ມີການບັນລຸທຳໂດຍລຳດັບ" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ທຳວິໄນມີການສຶກສາໄປໂດຍລຳດັບ ມີການພ່ຳເພັງໄປໂດຍລຳດັບ ມີການປະຕິບັດໄປໂດຍລຳດັບ ບໍ່ແມ່ນມີການບັນລຸອະຣະຫັດຕະຜົນໂດຍທັນທີ ເໝືອນມະຫາສະມຸດຕ່ຳລົງໄປໂດຍລຳດັບ ລາດລົງໄປໂດຍລຳດັບ ລຶກລົງໄປໂດຍລຳດັບ ບໍ່ລຶກຊັນດິ່ງໄປທັນທີ" ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ຈຶ່ງມີການບັນລຸທຳໂດຍລຳດັບ

ປຣ. ທ່ານບໍ່ຍອມຮັບວ່າ "ມີການບັນລຸທຳໂດຍລຳດັບ" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ຜູ້ມີປັນຍາເພິ່ງກຳຈັດມົນທິນຂອງຕົນເທື່ອລະໜ້ອຍ
ທຸກຂະນະ ໂດຍລຳດັບ ເໝືອນຊ່າງຄຳກຳຈັດຂີ້ມ້ຽງຄຳ"

ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ຈຶ່ງມີການບັນລຸທຳໂດຍລຳດັບ

ສກ. ທ່ານຍອມຮັບວ່າ "ມີການບັນລຸທຳໂດຍລຳດັບ" ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ວ່າ "ທ່ານພຣະຄະວຳປະຕິເຖຣະກ່າວກັບພິກຂຸທັງຫຼາຍດັ່ງນີ້ວ່າ "ຜູ້ມີອາຍຸທັງຫຼາຍ ຂ້າພະເຈົ້າໄດ້ສະດັບຮັບມາສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າວ່າ ພິກຂຸທັງຫຼາຍ ຜູ້ໃດເຫັນທຸກ ຜູ້ນັ້ນຊື່ວ່າເຫັນທຸກຂະສະມຸໄທແດ່ ເຫັນທຸກຂະນິໂຣທະແດ່ ເຫັນທຸກຂະນິໂຣທະຄາມິນີປະຕິປະທາແດ່ ຜູ້ໃດເຫັນທຸກຂະສະມຸໄທ ຜູ້ນັ້ນຊື່ວ່າເຫັນທຸກແດ່ ເຫັນທຸກຂະນິໂຣທະແດ່ ເຫັນທຸກຂະນິໂຣທະຄາມິນີປະຕິປະທາແດ່ ຜູ້ໃດເຫັນທຸກຂະນິໂຣທະ ຜູ້ນັ້ນຊື່ວ່າເຫັນທຸກແດ່ ເຫັນທຸກຂະສະມຸໄທແດ່ ເຫັນທຸກຂະນິໂຣທະຄາມິນີປະຕິປະທາແດ່ ຜູ້ໃດເຫັນທຸກຂະນິໂຣທະຄາມິນີປະຕິປະທາ ຜູ້ນັ້ນຊື່ວ່າເຫັນທຸກແດ່ ເຫັນທຸກຂະສະມຸໄທແດ່ ເຫັນທຸກຂະນິໂຣທະແດ່" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ມີການບັນລຸທຳໂດຍລຳດັບ"

ສກ. ມີການບັນລຸທຳໂດຍລຳດັບແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພ້ອມກັບການໄດ້ບັນລຸໂສດາປັດຕິມັກ ຯລຯ ແລະເປັນຜູ້ບໍ່ຄວນເພື່ອເຮັດອະພິຖານ ໖" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ມີການບັນລຸທຳໂດຍລຳດັບ"

ສກ. ມີການບັນລຸທຳໂດຍລຳດັບແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ໃນສະໄໝທີ່ທຳມະຈັກຂຸທີ່ປາສະຈາກທຸລີ ປາສະຈາກມົນທິນ ເກີດຂຶ້ນແກ່ອະຣິຍະສາວົກວ່າ "ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດມີຄວາມດັບເປັນທຳມະດາ" ພ້ອມກັບການເກີດຂຶ້ນແຫ່ງໂສດາປັດຕິມັກ ອະຣິຍະສາວົກຍ່ອມລະສັງໂຍດໄດ້ ໓ ປະການ ຄື ສັກກາຍະທິດຖິ ວິຈິກິດສາ ແລະສີລັບພະຕະປະຣາມາດ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ມີການບັນລຸທຳໂດຍລຳດັບ"

**ອະນຸປຸບພາພິສະມະຍະກະຖາ ຈົບ**

## ໑໐. ໂວຫາຣະກະຖາ (໑໗)

## ວ່າດ້ວຍພຣະໂວຫານ

[໓໔໗] ສກ. ພຣະໂວຫານຂອງພຣະຜູ້ມີພຣະພາກພຸດທະເຈົ້າ ເປັນໂລກຸດຕະຣະ ແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂວຫານຂອງພຣະຜູ້ມີພຣະພາກພຸດທະເຈົ້າ ກະທົບໂສຕະທີ່ເປັນໂລກຸດຕະຣະ ບໍ່ກະທົບໂສຕະທີ່ເປັນໂລກິຍະ ຮັບຮູ້ໄດ້ດ້ວຍວິນຍານທີ່ເປັນໂລກຸດຕະຣະ ຮັບຮູ້ບໍ່ໄດ້ດ້ວຍວິນຍານທີ່ເປັນໂລກິຍະ ພຣະອະຣິຍະສາວົກຮັບຮູ້ໄດ້ ແຕ່ປຸຖຸຊົນຮັບຮູ້ບໍ່ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະໂວຫານຂອງພຣະຜູ້ມີພຣະພາກພຸດທະເຈົ້າ ກະທົບໂສຕະທີ່ເປັນໂລກິຍະບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະໂອຫານຂອງພຣະຜູ້ມີພຣະພາກພຸດທະເຈົ້າ ກະທົບໂສຕະທີ່ເປັນໂລກິຍະ ທ່ານກໍບໍ່ຄວນຍອມຮັບວ່າ “ພຣະໂອຫານຂອງພຣະຜູ້ມີພຣະພາກພຸດທະເຈົ້າເປັນໂລກຸດຕະຣະ”

ສກ. ພຣະໂອຫານຂອງພຣະຜູ້ມີພຣະພາກພຸດທະເຈົ້າ ຮັບຮູ້ໄດ້ດ້ວຍໂລກິຍະວິນຍານບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະໂອຫານຂອງພຣະຜູ້ມີພຣະພາກພຸດທະເຈົ້າຮັບຮູ້ໄດ້ດ້ວຍໂລກິຍະວິນຍານ ທ່ານກໍບໍ່ຄວນຍອມຮັບວ່າ “ພຣະໂອຫານຂອງພຣະຜູ້ມີພຣະພາກພຸດທະເຈົ້າເປັນໂລກຸດຕະຣະ”

ສກ. ພຣະໂອຫານຂອງພຣະຜູ້ມີພຣະພາກພຸດທະເຈົ້າ ປຸຖຸຊົນກໍຮັບຮູ້ໄດ້ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະໂອຫານຂອງພຣະຜູ້ມີພຣະພາກພຸດທະເຈົ້າ ປຸຖຸຊົນກໍຮັບຮູ້ໄດ້ ທ່ານກໍ ບໍ່ຄວນຍອມຮັບວ່າ “ພຣະໂອຫານຂອງພຣະຜູ້ມີພຣະພາກພຸດທະເຈົ້າເປັນໂລກຸດຕະຣະ”

[໓໔໗] ສກ. ພຣະໂອຫານຂອງພຣະຜູ້ມີພຣະພາກພຸດທະເຈົ້າເປັນໂລກຸດຕະຣະ ແມ່ນບໍ?

ປຣ. ແມ່ນ

ສກ. ເປັນມັກ ຜົນ ນິບພານ ໂສດາປັດຕິມັກ ໂສດາປັດຕິຜົນ ສະກະທາຄາມິມັກ ສະກະທາຄາມິຜົນ ອະນາຄາມິມັກ ອະນາຄາມິຜົນ ອະຣະຫັດຕະມັກ ອະຣະຫັດຕະຜົນ ສະຕິປັດຖານ ສຳມັບປະທານ ອິດທິບາດ ອິນຊີ ພະລະ ໂພດຊົງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະໂອຫານຂອງພຣະຜູ້ມີພຣະພາກພຸດທະເຈົ້າເປັນໂລກຸດຕະຣະແມ່ນບໍ?

ປຣ. ແມ່ນ

ສກ. ຄົນບາງພວກທີ່ຈະຟັງພຣະໂອຫານຂອງພຣະຜູ້ມີພຣະພາກພຸດທະເຈົ້າມີຢູ່ ແມ່ນບໍ?

ປຣ. ແມ່ນ

ສກ. ໂລກຸດຕະຣະທຳຮັບຮູ້ໄດ້ດ້ວຍໂສຕະ ກະທົບທີ່ໂສຕະ ມາສູ່ຄອງແຫ່ງໂສຕະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂລກຸດຕະຣະທຳຮັບຮູ້ບໍ່ໄດ້ດ້ວຍໂສຕະ ບໍ່ກະທົບທີ່ໂສຕະ ບໍ່ມາສູ່ຄອງແຫ່ງໂສຕະ ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກໂລກຸດຕະຣະທຳຮູ້ບໍ່ໄດ້ດ້ວຍໂສຕະ ບໍ່ກະທົບທີ່ໂສຕະ ບໍ່ມາສູ່ຄອງແຫ່ງໂສຕະ ທ່ານກໍບໍ່ຄວນຍອມຮັບວ່າ “ພຣະໂອຫານຂອງພຣະຜູ້ມີພຣະພາກພຸດທະເຈົ້າເປັນໂລກຸດຕະຣະ”

[໓໔໘] ສກ. ພຣະໂອຫານຂອງພຣະຜູ້ມີພຣະພາກພຸດທະເຈົ້າເປັນໂລກຸດຕະຣະ ແມ່ນບໍ?

ປຣ. ແມ່ນ

ສກ. ຄົນບາງພວກທີ່ຈະເພິ່ງຍິນດີໃນພຣະໂອຫານ ຂອງພຣະຜູ້ມີພຣະພາກພຸດທະເຈົ້າມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ໂລກຸດຕະຣະທຳເປັນບ່ອນຕັ້ງແຫ່ງຣາຄະ ເປັນບ່ອນຕັ້ງແຫ່ງຄວາມຍິນດີ ເປັນບ່ອນຕັ້ງແຫ່ງຄວາມຕ້ອງການ ເປັນບ່ອນຕັ້ງແຫ່ງຄວາມເມົາ ເປັນບ່ອນຕັ້ງແຫ່ງຄວາມຜູກມັດ ເປັນບ່ອນຕັ້ງແຫ່ງຄວາມລຸ້ມຫຼົງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ໂລກຸດຕະຣະທຳບໍ່ເປັນບ່ອນຕັ້ງແຫ່ງຣາຄະ ບໍ່ເປັນບ່ອນຕັ້ງແຫ່ງຄວາມຍິນດີ ບໍ່ເປັນບ່ອນຕັ້ງແຫ່ງຄວາມຕ້ອງການ ບໍ່ເປັນບ່ອນຕັ້ງແຫ່ງຄວາມເມົາ ບໍ່ເປັນບ່ອນຕັ້ງແຫ່ງຄວາມຜູກມັດ ບໍ່ເປັນບ່ອນຕັ້ງແຫ່ງຄວາມລຸ້ມຫຼົງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກໂລກຸດຕະຣະທຳບໍ່ເປັນບ່ອນຕັ້ງແຫ່ງຣາຄະ ບໍ່ເປັນບ່ອນຕັ້ງແຫ່ງຄວາມຍິນດີ ບໍ່ເປັນບ່ອນຕັ້ງແຫ່ງຄວາມຕ້ອງການ ບໍ່ເປັນບ່ອນຕັ້ງແຫ່ງຄວາມເມົາ ບໍ່ເປັນບ່ອນຕັ້ງແຫ່ງຄວາມຜູກມັດ ບໍ່ເປັນບ່ອນຕັ້ງແຫ່ງຄວາມລຸ້ມຫຼົງ ທ່ານກໍບໍ່ຄວນຍອມຮັບວ່າ "ພຣະໂອຫານຂອງພຣະຜູ້ມີພຣະພາກພຸດທະເຈົ້າເປັນໂລກຸດຕະຣະ"

ສກ. ພຣະໂອຫານຂອງພຣະຜູ້ມີພຣະພາກພຸດທະເຈົ້າເປັນໂລກຸດຕະຣະແມ່ນບໍ?

ປຣ. ແມ່ນ

ສກ. ຄົນບາງພວກທີ່ຈະເພິ່ງຂັດເຄືອງໃນພຣະໂອຫານຂອງພຣະຜູ້ມີພຣະພາກພຸດທະເຈົ້າມີຢູ່ ແມ່ນບໍ?

ປຣ. ແມ່ນ

ສກ. ໂລກຸດຕະຣະທຳເປັນບ່ອນຕັ້ງແຫ່ງໂທສະ ເປັນບ່ອນຕັ້ງແຫ່ງຄວາມຂັດເຄືອງ ເປັນບ່ອນຕັ້ງແຫ່ງຄວາມກະທົບກະເທືອນໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ໂລກຸດຕະຣະທຳບໍ່ເປັນບ່ອນຕັ້ງແຫ່ງໂທສະ ບໍ່ເປັນບ່ອນຕັ້ງແຫ່ງຄວາມຂັດເຄືອງ ບໍ່ເປັນທີ່ຕັ້ງແຫ່ງຄວາມກະທົບກະເທືອນໃຈບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກໂລກຸດຕະຣະທຳບໍ່ເປັນບ່ອນຕັ້ງແຫ່ງໂທສະ ບໍ່ເປັນບ່ອນຕັ້ງແຫ່ງຄວາມຂັດເຄືອງ ບໍ່ເປັນບ່ອນຕັ້ງແຫ່ງຄວາມກະທົບກະເທືອນໃຈ ທ່ານກໍບໍ່ຄວນຍອມຮັບວ່າ "ພຣະໂອຫານຂອງພຣະຜູ້ມີພຣະພາກພຸດທະເຈົ້າເປັນໂລກຸດຕະຣະ"

ສກ. ພຣະໂອຫານຂອງພຣະຜູ້ມີພຣະພາກພຸດທະເຈົ້າເປັນໂລກຸດຕະຣະແມ່ນບໍ?

ປຣ. ແມ່ນ

ສກ. ຄົນບາງພວກທີ່ຈະເພິ່ງຫຼີງໃນພຣະໂອຫານຂອງພຣະຜູ້ມີພຣະພາກພຸດທະເຈົ້າມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ໂລກຸດຕະຣະທຳທີ່ເປັນບ່ອນຕັ້ງຂອງໂມຫະ ເຮັດຄວາມບໍ່ຮູ້ ເຮັດໃຫ້ເປັນຜູ້ບໍ່ມີຈັກຂຸ ເປັນທີ່ປິດກັ້ນແຫ່ງປັນຍາ ເປັນຝ່າຍແຫ່ງຄວາມຄັບແຄ້ນ ບໍ່ເປັນໄປເພື່ອນິບພານບໍ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ໂລກຸດຕະຣະທຳບໍ່ເປັນບ່ອນຕັ້ງແຫ່ງໂມຫະ ບໍ່ເຮັດຄວາມບໍ່ຮູ້ ບໍ່ເຮັດໃຫ້ເປັນຜູ້ບໍ່ມີຈັກຂຸ ເປັນບ່ອນຈະເລີນແຫ່ງປັນຍາ ບໍ່ເປັນຝ່າຍແຫ່ງຄວາມຄັບແຄ້ນ ເປັນໄປເພື່ອນິບພານບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກໂລກຸດຕະຣະທຳບໍ່ເປັນບ່ອນຕັ້ງແຫ່ງໂມຫະ ບໍ່ເຮັດຄວາມບໍ່ຮູ້ ບໍ່ເຮັດໃຫ້ເປັນຜູ້ບໍ່ມີຈັກຂຸ ເປັນບ່ອນຈະເລີນແຫ່ງປັນຍາ ບໍ່ເປັນຝ່າຍແຫ່ງຄວາມຄັບແຄ້ນ ເປັນໄປເພື່ອນິບພານ ທ່ານກໍບໍ່ຄວນຍອມຮັບວ່າ"ພຣະໂອຫານຂອງພຣະຜູ້ມີພຣະພາກພຸດທະເຈົ້າເປັນໂລກຸດຕະຣະ"

[໓໕໐] ສກ. ພຣະໂອຫານຂອງພຣະຜູ້ມີພຣະພາກພຸດທະເຈົ້າເປັນໂລກຸດຕະຣະ ແມ່ນບໍ?

ປຣ. ແມ່ນ

ສກ. ຊົນເຫຼົ່າໃດເຫຼົ່າໜຶ່ງຟັງພຣະໂອຫານຂອງພຣະຜູ້ມີພຣະພາກພຸດທະເຈົ້າຢູ່ຊົນເຫຼົ່ານັ້ນທັງໝົດຈະເລີນມັກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຊົນເຫຼົ່າໃດເຫຼົ່າໜຶ່ງຟັງພຣະໂອຫານຂອງພຣະຜູ້ມີພຣະພາກພຸດທະເຈົ້າຢູ່ ຊົນເຫຼົ່ານັ້ນທັງໝົດຈະເລີນມັກແມ່ນບໍ?

ປຣ. ແມ່ນ

ສກ. ພານປຸຖຸຊົນຟັງພຣະໂອຫານຂອງພຣະຜູ້ມີພຣະພາກພຸດທະເຈົ້າຢູ່ ຊື່ວ່າຈະເລີນມັກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຜູ້ຂ້າມານດາ ฯລฯ ຂ້າບິດາ ฯລฯ ຂ້າພຣະອະຣະຫັນ ฯລฯ ທຳຮ້າຍພຣະພຸດທະເຈົ້າຈົນເຖິງພຣະໂລຫິດຫໍ້ ฯລฯ ທຳລາຍສົງໃຫ້ແຕກກັນ ຟັງພຣະໂອຫານຂອງພຣະຜູ້ມີພຣະພາກພຸດທະເຈົ້າຢູ່ຊື່ວ່າຈະເລີນມັກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໓໕໑] ປຣ. ກອງເຂົ້າເປືອກກໍດີ ກອງຄຳກໍດີ ໃຊ້ໄມ້ການເທົ້າຄຳຊີ້ບອກໄດ້ ແມ່ນບໍ?

ສກ. ແມ່ນ

ປຣ. ແນວນັ້ນຄືກັນ ສະພາວະທຳທີ່ເປັນໂລກິຍະກໍດີ ທີ່ເປັນໂລກຸດຕະຣະກໍດີ ພຣະຜູ້ມີພຣະພາກເຈົ້າຕັດດ້ວຍພຣະໂວຫານທີ່ເປັນໂລກຸດຕະຣະ

ສກ. ກອງເຂົ້າເປືອກກໍດີ ກອງຄຳກໍດີ ໃຊ້ໄມ້ການເທົ້າຕົ້ນທຸ່ງສາຊີ້ບອກໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ແນວນັ້ນຄືກັນ ສະພາວະທຳທີ່ເປັນໂລກິຍະກໍດີ ທີ່ເປັນໂລກຸດຕະຣະກໍດີ ພຣະຜູ້ມີພຣະພາກເຈົ້າຕັດດ້ວຍພຣະໂວຫານທີ່ເປັນໂລກິຍະ

[໓໕໔] ສກ. ພຣະໂວຫານຂອງພຣະຜູ້ມີພຣະພາກພຸດທະເຈົ້າ ເມື່ອຕັດໂລກິຍະທຳກໍເປັນໂລກິຍະ ເມື່ອຕັດໂລກຸດຕະຣະທຳກໍເປັນໂລກຸດຕະຣະແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອຕັດໂລກິຍະທຳ ພຣະໂວຫານນັ້ນກະທົບໂສຕະທີ່ເປັນໂລກິຍະ ເມື່ອຕັດໂລກຸດຕະຣະທຳ ກະທົບໂສຕະທີ່ເປັນໂລກຸດຕະຣະ ເມື່ອຕັດໂລກິຍະທຳ ຊົນທັງຫຼາຍຮັບຮູ້ໄດ້ດ້ວຍວິນຍານທີ່ເປັນໂລກິຍະ ເມື່ອຕັດໂລກຸດຕະຣະທຳ ຮັບຮູ້ໄດ້ດ້ວຍວິນຍານທີ່ເປັນໂລກຸດຕະຣະ ເມື່ອຕັດໂລກິຍະທຳ ປຸຖຸຊົນຮັບຮູ້ໄດ້ ເມື່ອຕັດໂລກຸດຕະຣະທຳ ພຣະສາວົກຮັບຮູ້ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ທ່ານບໍ່ຍອມຮັບວ່າ "ພຣະໂວຫານຂອງພຣະຜູ້ມີພຣະພາກພຸດທະເຈົ້າ ເມື່ອຕັດໂລກິຍະທຳກໍເປັນໂລກິຍະ ເມື່ອຕັດໂລກຸດຕະຣະທຳກໍເປັນໂລກຸດຕະຣະ" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະຜູ້ມີພຣະພາກເຈົ້າຕັດທັງໂລກິຍະທຳ ແລະໂລກຸດຕະຣະທຳບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກພຣະຜູ້ມີພຣະພາກເຈົ້າຕັດທັງໂລກິຍະທຳແລະໂລກຸດຕະຣະທຳ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ພຣະໂວຫານຂອງພຣະຜູ້ມີພຣະພາກພຸດທະເຈົ້າ ເມື່ອຕັດໂລກິຍະທຳກໍເປັນໂລກິຍະ ເມື່ອຕັດໂລກຸດຕະຣະທຳກໍເປັນໂລກຸດຕະຣະ"

ສກ. ພຣະໂວຫານຂອງພຣະຜູ້ມີພຣະພາກພຸດທະເຈົ້າ ເມື່ອຕັດໂລກິຍະທຳກໍເປັນໂລກິຍະ ເມື່ອຕັດໂລກຸດຕະຣະທຳກໍເປັນໂລກຸດຕະຣະແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອຕັດມັກກໍເປັນມັກ ເມື່ອຕັດສະພາວະທຳທີ່ບໍ່ແມ່ນມັກກໍເປັນສະພາວະທຳທີ່ບໍ່ແມ່ນມັກ ເມື່ອຕັດຜົນກໍເປັນຜົນ ເມື່ອຕັດສະພາວະທຳທີ່ບໍ່ແມ່ນຜົນກໍເປັນສະພາວະທຳທີ່ບໍ່ແມ່ນຜົນ ເມື່ອຕັດນິບພານກໍເປັນນິບພານ ເມື່ອຕັດສະພາວະທຳທີ່ບໍ່ແມ່ນນິບພານກໍເປັນສະພາວະທຳທີ່ບໍ່ແມ່ນນິບພານ ເມື່ອຕັດສັງຂະຕະທຳກໍເປັນສັງຂະຕະທຳ ເມື່ອຕັດອະສັງຂະຕະທຳ ກໍເປັນອະສັງຂະຕະທຳ ເມື່ອຕັດຮູບກໍເປັນຮູບ ເມື່ອຕັດສະພາວະທຳທີ່ບໍ່ແມ່ນຮູບກໍເປັນສະພາວະທຳທີ່ບໍ່

ແມ່ນຮູບ ເມື່ອຕັດເວທະນາກໍເປັນເວທະນາ ເມື່ອຕັດສະພາວະທໍາທີ່ບໍ່ແມ່ນເວທະນາກໍເປັນ ສະພາວະທໍາທີ່ບໍ່ແມ່ນເວທະນາ ເມື່ອຕັດສັນຍາກໍເປັນສັນຍາ ເມື່ອຕັດສະພາວະທໍາທີ່ບໍ່ແມ່ນສັນຍາກໍເປັນສະພາວະທໍາທີ່ບໍ່ແມ່ນສັນຍາ ເມື່ອຕັດສັງຂານກໍເປັນສັງຂານ ເມື່ອຕັດສະພາວະທໍາທີ່ບໍ່ແມ່ນສັງຂານ ກໍເປັນສະພາວະທໍາທີ່ບໍ່ແມ່ນສັງຂານ ເມື່ອຕັດວິນຍານກໍເປັນວິນຍານ ເມື່ອຕັດສະພາວະທໍາທີ່ບໍ່ແມ່ນວິນຍານກໍເປັນສະພາວະທໍາທີ່ບໍ່ແມ່ນວິນຍານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

**ໂອທາຣະກະຖາ ຈົບ**

## ໑໑. ນິໂຣທະກະຖາ (໔໐)

## ວ່າດ້ວຍນິໂຣດ

[໓໕໓] ສກ. ນິໂຣດມີ ໒ ຢ່າງແມ່ນບໍ?

ປຣ.໑ ແມ່ນ

ສກ. ທຸກຂະນິໂຣທະມີ ໒ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ທຸກຂະນິໂຣທະມີ ໒ ຢ່າງແມ່ນບໍ?

ປຣ. ແມ່ນ

ສກ. ນິໂຣທະສັດມີ ໒ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ນິໂຣທະສັດມີ ໒ ຢ່າງແມ່ນບໍ?

ປຣ. ແມ່ນ

ສກ. ທຸກຂະສັດມີ ໒ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ນິໂຣທະສັດມີ ໒ ຢ່າງແມ່ນບໍ?

ປຣ. ແມ່ນ

ສກ. ສະມຸທະຍະສັດມີ ໒ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ນິໂຣທະສັດມີ ໒ ຢ່າງແມ່ນບໍ?

ປຣ. ແມ່ນ

ສກ. ມັກຄະສັດມີ ໒ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ນິໂຣທະສັດມີ ໘ ຢ່າງແມ່ນບໍ?

ປຣ. ແມ່ນ

ສກ. ບ່ອນຕ້ານທານມີ ໘ ຢ່າງ ຯລຯ ບ່ອນສອກຫຼີກມີ ໘ ຢ່າງ ຯລຯ ບ່ອນຣະລຶກມີ ໘ ຢ່າງ ຯລຯ ຈຸດມຸ້ງໝາຍມີ ໘ ຢ່າງ ຯລຯ ບ່ອນໝັ້ນມີ ໘ ຢ່າງ ຯລຯ ອຳມະຕະມີ ໘ ຢ່າງ ຯລຯ ນິບພານມີ ໘ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ນິບພານມີ ໘ ຢ່າງແມ່ນບໍ?

ປຣ. ແມ່ນ

ສກ. ນິບພານທັງ ໘ ຢ່າງ ຍັງມີຄວາມສູງຕ່ຳ ຄວາມຊົ່ວແລະຄວາມປະນີດ ຄວາມຍິ່ງແລະຢ່ອນ ເຂດແດນ ຄວາມແຕກຕ່າງ ຮ່ອງຮອຍ ຊ່ອງວ່າງຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ນິໂຣດມີ ໘ ຢ່າງແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນນຳສັງຂານທີ່ດັບໂດຍບໍ່ຕ້ອງພິຈາລະນາ ມາພິຈາລະນາໃຫ້ດັບໄດ້ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນນຳສັງຂານທີ່ດັບໂດຍບໍ່ຕ້ອງພິຈາລະນາມາພິຈາລະນາ ໃຫ້ດັບໄດ້ທ່ານ ກໍບໍ່ຄວນຍອມຮັບວ່າ “ນິໂຣດມີ ໘ ຢ່າງ”

ປຣ. ທ່ານບໍ່ຍອມຮັບວ່າ “ນິໂຣດມີ ໘ ຢ່າງ” ແມ່ນບໍ?

ສກ. ແມ່ນ

ປຣ. ສັງຂານທີ່ດັບໂດຍບໍ່ຕ້ອງພິຈາລະນາກໍດີ ທີ່ດັບໂດຍພິຈາລະນາກໍດີ ຕ່າງກໍດັບສະນິດແລ້ວບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກສັງຂານທີ່ດັບໂດຍບໍ່ຕ້ອງພິຈາລະນາກໍດີ ທີ່ດັບໂດຍພິຈາລະນາກໍດີ ຕ່າງກໍດັບສະນິດ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ “ນິໂຣດມີ ໘ ຢ່າງ”

ສກ. ນິໂຣດມີ ໘ ຢ່າງແມ່ນບໍ?

ປຣ. ແມ່ນ

ສກ. ສັງຂານແມ່ນທີ່ດັບໂດຍພິຈາລະນາ ຊື່ວ່າດັບ ຍ້ອນອາໄສອະຣິຍະມັກແມ່ນບໍ?

ປຣ. ແມ່ນ

ສກ. ສັງຂານທີ່ດັບໂດຍບໍ່ຕ້ອງພິຈາລະນາ ຊື່ວ່າດັບ ຍ້ອນອາໄສອະຣິຍະມັກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ນິໂຣດມີ ໘ ຢ່າງແມ່ນບໍ?

ປຣ. ແມ່ນ

ສກ. ສັງຂານທີ່ດັບໂດຍພິຈາລະນາ ບໍ່ເກີດຂຶ້ນອີກແມ່ນບໍ?

ປຣ. ແມ່ນ

ສກ. ສັງຂານທີ່ດັບໂດຍບໍ່ຕ້ອງພິຈາລະນາ ກໍບໍ່ເກີດຂຶ້ນອີກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ນິໂຣດມີ ໘ ຢ່າງ"

**ນິໂຣທະກະຖາ ຈົບ**

**ທຸຕິຍະວັກ ຈົບ**

## ລວມກະຖາທີ່ມີໃນວັກນີ້ ຄື

໑. ປະຣູປະຫາຣະກະຖາ
໒. ອັນຍານະກະຖາ
໓. ກັງຂາກະຖາ
໔. ປະຣະວິຕາຣະນະກະຖາ
໕. ວະຈີເພທະກະຖາ
໖. ທຸກຂາຫາຣະກະຖາ
໗. ຈິດຕັດຖິຕິກະຖາ
໘. ກຸກກຸນະກະຖາ
໙. ອະນຸປຸບພາພິສະມະຍະກະຖາ
໑໐. ໂວຫາຣະກະຖາ
໑໑. ນິໂຣທະກະຖາ

# ໓. ຕະຕິຍະວັກ

## ໑. ພະລະກະຖາ (໔໑)

### ວ່າດ້ວຍກຳລັງ

[໓໕໔] ສກ. ກຳລັງຂອງພຣະຕະຖາຄົດເຈົ້າ ມີໄດ້ທົ່ວໄປແກ່ພຣະສາວົກແມ່ນບໍ?

ປຣ. ແມ່ນ

ສກ. ກຳລັງຂອງພຣະຕະຖາຄົດເຈົ້າກໍຄືກຳລັງຂອງພຣະສາວົກ ກຳລັງຂອງພຣະສາວົກກໍຄືກຳລັງຂອງພຣະຕະຖາຄົດເຈົ້າແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກຳລັງຂອງພຣະຕະຖາຄົດເຈົ້າ ມີໄດ້ທົ່ວໄປແກ່ພຣະສາວົກແມ່ນບໍ?

ປຣ. ແມ່ນ

ສກ. ກຳລັງຂອງພຣະຕະຖາຄົດເຈົ້າກັບກຳລັງຂອງພຣະສາວົກເປັນອັນດຽວກັນ ກຳລັງຂອງພຣະສາວົກກັບກຳລັງຂອງພຣະຕະຖາຄົດເຈົ້າກໍເປັນອັນດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກຳລັງຂອງພຣະຕະຖາຄົດເຈົ້າ ມີໄດ້ທົ່ວໄປແກ່ພຣະສາວົກແມ່ນບໍ?

ປຣ. ແມ່ນ

ສກ. ກຳລັງຂອງພຣະສາວົກກໍເຊັ່ນດຽວກັບກຳລັງຂອງພຣະຕະຖາຄົດເຈົ້າ ກຳລັງຂອງພຣະຕະຖາຄົດເຈົ້າກໍເຊັ່ນດຽວກັບກຳລັງຂອງພຣະສາວົກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກຳລັງຂອງພຣະຕະຖາຄົດເຈົ້າ ມີໄດ້ທົ່ວໄປແກ່ພຣະສາວົກແມ່ນບໍ?

ປຣ. ແມ່ນ

ສກ. ບຸຣະພະປະໂຍຄະ ບຸຣະພະຈະຣິຍາ ການກ່າວທຳ ການສະແດງທຳຂອງພຣະສາວົກ ກໍເຊັ່ນດຽວກັບບຸຣະພະປະໂຍຄະ ບຸຣະພະຈະຣິຍາ ການກ່າວທຳ ການສະແດງທຳຂອງພຣະຕະຖາຄົດເຈົ້າແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກຳລັງຂອງພຣະຕະຖາຄົດເຈົ້າ ມີໄດ້ທົ່ວໄປແກ່ພຣະສາວົກແມ່ນບໍ?

ປຣ. ແມ່ນ

ສກ. ພຣະຕະຖາຄົດເຈົ້າຊົງເປັນພຣະຊິນນະເຈົ້າ ເປັນພຣະສາດສະດາ ເປັນພຣະສຳມາສຳພຸດທະເຈົ້າເປັນພຣະສັບພັນຍູ ເປັນພຣະສັບພະທັດສາວີ ເປັນພຣະທຳມັດສາມີ ເປັນພຣະທຳມະປະຕິສະຣະນະແມ່ນບໍ?

ປຣ. ແມ່ນ

ສກ. ພຣະສາວົກກໍເປັນພຣະຊິນນະເຈົ້າ ເປັນພຣະສາດສະດາ ເປັນພຣະສໍາມາສໍາພຸດທະເຈົ້າ ເປັນພຣະສັບພັນຍູ ເປັນພຣະສັບພະທັດສາວີ ເປັນພຣະທໍາມັດສາມີ ເປັນພຣະທໍາມະປະຕິສະຣະນະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກໍາລັງຂອງພຣະຕະຖາຄົດເຈົ້າ ມີໄດ້ທົ່ວໄປແກ່ພຣະສາວົກແມ່ນບໍ?

ປຣ. ແມ່ນ

ສກ. ພຣະຕະຖາຄົດເຈົ້າເປັນຜູ້ຍັງມັກທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ເປັນຜູ້ໃຫ້ກໍາເນີດແກ່ມັກທີ່ຍັງບໍ່ມີໃຜໃຫ້ກໍາເນີດ ເປັນຜູ້ບອກມັກທີ່ຍັງບໍ່ມີໃຜບອກ ເປັນຜູ້ຮູ້ມັກ ເປັນຜູ້ເຂົ້າໃຈມັກ ເປັນຜູ້ສະຫຼາດໃນມັກແມ່ນບໍ?

ປຣ. ແມ່ນ

ສກ. ພຣະສາວົກກໍເປັນຜູ້ຍັງມັກທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ເປັນຜູ້ໃຫ້ກໍາເນີດແກ່ມັກທີ່ຍັງບໍ່ມີໃຜໃຫ້ກໍາເນີດ ເປັນຜູ້ບອກມັກທີ່ຍັງບໍ່ມີໃຜບອກ ເປັນຜູ້ຮູ້ມັກ ເປັນຜູ້ເຂົ້າໃຈມັກ ເປັນຜູ້ສະຫຼາດໃນມັກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກໍາລັງຂອງພຣະຕະຖາຄົດເຈົ້າຄືປັນຍາຢັ່ງຮູ້ຕາມຄວາມເປັນຈິງເຊິ່ງຄວາມຍິ່ງແລະຢ່ອນແຫ່ງອິນຊີຂອງສັດ (ອິນທະຣິຍະປະໂຣປະຣິຍັດຕະຍານ) ມີໄດ້ທົ່ວໄປແກ່ພຣະສາວົກແມ່ນບໍ?

ປຣ. ແມ່ນ

ສກ. ພຣະສາວົກເປັນຜູ້ຮູ້ທໍາທັງປວງ ເປັນຜູ້ເຫັນທໍາທັງປວງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໓໕໕] ປຣ. ພຣະສາວົກຮູ້ຖານະແລະອະຖານະແມ່ນບໍ?

ສກ. ແມ່ນ

ປຣ. ຫາກພຣະສາວົກຮູ້ຖານະແລະອະຖານະໄດ້ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ກໍາລັງຂອງພຣະຕະຖາຄົດເຈົ້າຄືປັນຍາຢັ່ງຮູ້ຕາມຄວາມເປັນຈິງເຖິງຖານະ ແລະອະຖານະ (ຖານາຖານະຍານ) ມີໄດ້ທົ່ວໄປແກ່ພຣະສາວົກ"

ປຣ. ພຣະສາວົກຮູ້ວິບາກແຫ່ງກໍາສະມາທານທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນໂດຍຖານະ ໂດຍເຫດ ແມ່ນບໍ?

ສກ. ແມ່ນ

ປຣ. ຫາກພຣະສາວົກຮູ້ວິບາກແຫ່ງກໍາສະມາທານທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນໂດຍຖານະ ໂດຍເຫດ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ກໍາລັງຂອງພຣະຕະຖາຄົດ

ເຈົ້າ ຄືປັນຍາຢັ່ງຮູ້ຕາມຄວາມເປັນຈິງເຖິງວິບາກແຫ່ງກຳສະມາທານ (ກຳວິປາກະຍານ) ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນໂດຍຖານະ ໂດຍເຫດ ມີໄດ້ທົ່ວໄປແກ່ພຣະສາວົກ"

ປຣ. ພຣະສາວົກຮູ້ປະຕິປະທາທີ່ຈະໃຫ້ສັດເຖິງຄະຕິ ແລະບໍ່ແມ່ນຄະຕິທັງປວງໄດ້ແມ່ນບໍ?

ສກ. ແມ່ນ

ປຣ. ຫາກພຣະສາວົກຮູ້ປະຕິປະທາທີ່ຈະໃຫ້ສັດເຖິງຄະຕິ ແລະບໍ່ແມ່ນຄະຕິທັງປວງໄດ້ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັນຍາຢັ່ງຮູ້ຕາມຄວາມເປັນຈິງເຖິງປະຕິປະທາທີ່ຈະໃຫ້ສັດເຖິງຄະຕິ ແລະບໍ່ແມ່ນຄະຕິທັງປວງ (ສັບພັດຖະຄາມີນີປະຕິປະທາຍານ) ມີໄດ້ທົ່ວໄປ ແກ່ພຣະສາວົກ"

ປຣ. ພຣະສາວົກຮູ້ໂລກເຊິ່ງມີທາດຫຼາຍຢ່າງຕ່າງ ໆ ກັນໄດ້ແມ່ນບໍ?

ສກ. ແມ່ນ

ປຣ. ຫາກພຣະສາວົກຮູ້ໂລກເຊິ່ງມີທາດຫຼາຍຢ່າງຕ່າງ ໆ ກັນໄດ້ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ກຳລັງຂອງພຣະຕະຖາຄົດເຈົ້າຄື ປັນຍາຢັ່ງຮູ້ຕາມຄວາມເປັນຈິງ ເຊິ່ງມີທາດຫຼາຍຢ່າງຕ່າງ ໆ ກັນ (ນານາທາຕຸຍານ) ມີໄດ້ທົ່ວໄປແກ່ພຣະສາວົກ"

ປຣ. ພຣະສາວົກຮູ້ວ່າ "ສັດທັງຫຼາຍມີອັດທະຍາໄສຕ່າງ ໆ ກັນໄດ້" ແມ່ນບໍ?

ສກ. ແມ່ນ

ປຣ. ຫາກພຣະສາວົກຮູ້ວ່າ "ສັດທັງຫຼາຍມີອັດທະຍາໄສຕ່າງ ໆ ກັນໄດ້" ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ກຳລັງຂອງພຣະຕະຖາຄົດເຈົ້າຄືປັນຍາຢັ່ງຮູ້ຕາມຄວາມເປັນຈິງເຖິງຄວາມທີ່ສັດທັງຫຼາຍມີອັດທະຍາໄສຕ່າງ ໆ ກັນ (ນານາທິມຸດຕິກະຍານ) ມີໄດ້ທົ່ວໄປແກ່ພຣະສາວົກ"

ປຣ. ພຣະສາວົກຮູ້ຄວາມເສົ້າໝອງ ຄວາມຜ່ອງແຜ້ວ ການອອກຈາກຊານ ວິໂມກ ສະມາທິ ແລະສະມາບັດໄດ້ແມ່ນບໍ?

ສກ. ແມ່ນ

ປຣ. ຫາກພຣະສາວົກຮູ້ຄວາມເສົ້າໝອງ ຄວາມຜ່ອງແຜ້ວ ການອອກຈາກຊານ ວິໂມກ ສະມາທິ ແລະສະມາບັດໄດ້ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ກຳລັງຂອງພຣະຕະຖາຄົດເຈົ້າຄືປັນຍາຢັ່ງຮູ້ຕາມຄວາມເປັນຈິງເຖິງຄວາມເສົ້າໝອງ ຄວາມຜ່ອງແຜ້ວ ການອອກຈາກຊານ ວິໂມກ ສະມາທິ ແລະສະມາບັດ (ຊານາທິສັງກິເລສາທິຍານ) ມີໄດ້ທົ່ວໄປແກ່ພຣະສາວົກ"

ປຣ. ພຣະສາວົກຮູ້ການຣະລຶກເຖິງຂັນທີ່ອາໄສຢູ່ໃນຊາດກ່ອນໄດ້ແມ່ນບໍ?

ສກ. ແມ່ນ

ປຣ. ຫາກພຣະສາວົກຮູ້ການຣະລຶກເຖິງຂັນທີ່ອາໄສຢູ່ໃນຊາດກ່ອນໄດ້ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ກຳລັງຂອງພຣະຕະຖາຄົດເຈົ້າຄືປັນຍາຢັ່ງຮູ້ຕາມຄວາມເປັນຈິງເຖິງການຣະລຶກເຖິງຂັນທີ່ອາໄສຢູ່ໃນຊາດກ່ອນ (ປຸບເພນິວາສານຸດສະຕິຍານ) ມີໄດ້ທົ່ວໄປແກ່ພຣະສາວົກ"

ປຣ. ພຣະສາວົກຮູ້ຈຸຕິ ແລະປະຕິສົນທິຂອງສັດທັງຫຼາຍໄດ້ແມ່ນບໍ?

ສກ. ແມ່ນ

ປຣ. ຫາກພຣະສາວົກຮູ້ຈຸຕິ ແລະປະຕິສົນທິຂອງສັດທັງຫຼາຍໄດ້ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັນຍາຢັ່ງຮູ້ຕາມຄວາມເປັນຈິງເຖິງຈຸຕິແລະປະຕິສົນທິຂອງສັດທັງຫຼາຍ (ຈຸຕູປະປາຕະຍານ) ມີໄດ້ທົ່ວໄປແກ່ພຣະສາວົກ"

ປຣ. ອາສະວະຂອງພຣະຕະຖາຄົດເຈົ້າສິ້ນໄປແລ້ວ ແລະຂອງພຣະສາວົກກໍສິ້ນໄປແລ້ວບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ເຫດອັນໃດ? ໆ ທີ່ເຮັດໃຫ້ຕ່າງກັນລະຫວ່າງຄວາມສິ້ນໄປແຫ່ງອາສະວະຂອງພຣະຕະຖາຄົດເຈົ້າ ກັບຄວາມສິ້ນໄປແຫ່ງອາສະວະຂອງພຣະສາວົກ ຫຼື ລະຫວ່າງຄວາມລຸດພົ້ນຂອງພຣະຕະຖາຄົດເຈົ້າ ກັບຄວາມລຸດພົ້ນຂອງພຣະສາວົກມີຢູ່ແມ່ນບໍ?

ສກ. ບໍ່ມີ

ປຣ. ຫາກບໍ່ມີເຫດອັນໃດ ໆ ທີ່ເຮັດໃຫ້ຕ່າງກັນລະຫວ່າງຄວາມສິ້ນໄປແຫ່ງອາສະວະຂອງພຣະຕະຖາຄົດເຈົ້າກັບຄວາມສິ້ນໄປແຫ່ງອາສະວະຂອງພຣະສາວົກ ຫຼື ລະຫວ່າງຄວາມລຸດພົ້ນຂອງພຣະຕະຖາຄົດເຈົ້າກັບຄວາມລຸດພົ້ນຂອງພຣະສາວົກ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ກຳລັງຂອງພຣະຕະຖາຄົດເຈົ້າຄືປັນຍາຢັ່ງຮູ້ຕາມຄວາມເປັນຈິງໃນຄວາມສິ້ນໄປແຫ່ງອາສະວະ (ອາສະວັກຂະຍະຍານ) ມີໄດ້ທົ່ວໄປແກ່ພຣະສາວົກ"

[໓໕໖] ປຣ. ກຳລັງຂອງພຣະຕະຖາຄົດເຈົ້າຄືປັນຍາຢັ່ງຮູ້ຕາມຄວາມເປັນຈິງໃນຄວາມສິ້ນໄປແຫ່ງອາສະວະມີໄດ້ທົ່ວໄປແກ່ພຣະສາວົກແມ່ນບໍ?

ສກ. ແມ່ນ

ປຣ. ກຳລັງຂອງພຣະຕະຖາຄົດເຈົ້າຄືປັນຍາຢັ່ງຮູ້ຕາມຄວາມເປັນຈິງໃນຖານະແລະອະຖານະມີໄດ້ທົ່ວໄປແກ່ພຣະສາວົກແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ฯລฯ

ປຣ. ກຳລັງຂອງພຣະຕະຖາຄົດເຈົ້າຄືປັນຍາຢັ່ງຮູ້ຕາມຄວາມເປັນຈິງໃນຄວາມສິ້ນໄປແຫ່ງອາສະວະ ມີໄດ້ທົ່ວໄປແກ່ພຣະສາວົກແມ່ນບໍ?

ສກ. ແມ່ນ

ປຣ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັນຍາຢັ່ງຮູ້ຕາມຄວາມເປັນຈິງໃນຈຸຕິ ແລະປະຕິສົນທິຂອງສັດທັງຫຼາຍ ມີໄດ້ທົ່ວໄປແກ່ພຣະສາວົກແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ฯລฯ

ປຣ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັນຍາຢັ່ງຮູ້ຕາມຄວາມເປັນຈິງໃນຖານະ ແລະອະຖານະມີໄດ້ບໍ່ທົ່ວໄປແກ່ພຣະສາວົກແມ່ນບໍ?

ສກ. ແມ່ນ

ປຣ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັຊາຢັ່ງຮູ້ຕາມຄວາມເປັນຈິງໃນຄວາມສິ້ນໄປແຫ່ງອາສະວະ ມີໄດ້ບໍ່ທົ່ວໄປແກ່ພຣະສາວົກແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ໆລໆ

ປຣ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັຊາຢັ່ງຮູ້ຕາມຄວາມເປັນຈິງໃນຈຸຕິແລະປະຕິສົນທິຂອງສັດທັງຫຼາຍ ມີໄດ້ບໍ່ທົ່ວໄປແກ່ພຣະສາວົກແມ່ນບໍ?

ສກ. ແມ່ນ

ປຣ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັຊາຢັ່ງຮູ້ຕາມຄວາມເປັນຈິງໃນຄວາມສິ້ນໄປແຫ່ງອາສະວະ ມີໄດ້ບໍ່ທົ່ວໄປແກ່ພຣະສາວົກແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ໆລໆ

ປຣ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັຊາຢັ່ງຮູ້ຕາມຄວາມເປັນຈິງເຖິງຄວາມຍິ່ງແລະຍ່ອນແຫ່ງອິນຊີ ມີໄດ້ບໍ່ທົ່ວໄປແກ່ພຣະສາວົກແມ່ນບໍ?

ສກ. ແມ່ນ

ປຣ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັຊາຢັ່ງຮູ້ຕາມຄວາມເປັນຈິງໃນຖານະແລະອະຖານະມີໄດ້ບໍ່ທົ່ວໄປແກ່ພຣະສາວົກແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ໆລໆ

ປຣ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັຊາຢັ່ງຮູ້ຕາມຄວາມເປັນຈິງເຖິງຄວາມຍິ່ງແລະຍ່ອນແຫ່ງອິນຊີ ມີໄດ້ບໍ່ທົ່ວໄປແກ່ພຣະສາວົກແມ່ນບໍ?

ສກ. ແມ່ນ

ປຣ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັຊາຢັ່ງຮູ້ຕາມຄວາມເປັນຈິງ ໃນຄວາມສິ້ນໄປແຫ່ງອາສະວະ ມີໄດ້ບໍ່ທົ່ວໄປແກ່ພຣະສາວົກແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ໆລໆ

ປຣ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັຊາຢັ່ງຮູ້ຕາມຄວາມເປັນຈິງໃນຖານະແລະອະຖານະມີໄດ້ທົ່ວໄປແກ່ພຣະສາວົກແມ່ນບໍ?

ສກ. ແມ່ນ

ປຣ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັຊາຢັ່ງຮູ້ຕາມຄວາມເປັນຈິງເຖິງຄວາມຍິ່ງແລະຍ່ອນແຫ່ງອິນຊີ ມີໄດ້ທົ່ວໄປແກ່ພຣະສາວົກແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ໆລໆ

ປຣ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັຊາຢັ່ງຮູ້ຕາມຄວາມເປັນຈິງໃນຄວາມສິ້ນໄປແຫ່ງອາສະວະ ມີໄດ້ທົ່ວໄປແກ່ພຣະສາວົກແມ່ນບໍ?

ສກ. ແມ່ນ

ປຣ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັຊາຢັ່ງຮູ້ຕາມຄວາມເປັນຈິງເຖິງຄວາມຍິ່ງແລະຢ່ອນແຫ່ງອິນຊີ ມີໄດ້ທົ່ວໄປແກ່ພຣະສາວົກແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ฯລฯ

**ພະລະກະຖາ ຈົບ**

# ໘. ອະຣິຍັນຕິກະຖາ (໔໘)

## ວ່າດ້ວຍຄວາມເປັນອະຣິຍະ

[໓໕໗] ສກ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັຊາຢັ່ງຮູ້ຕາມຄວາມເປັນຈິງໃນຖານະແລະອະຖານະເປັນອະຣິຍະແມ່ນບໍ?

ປຣ. ແມ່ນ

ສກ. ກຳລັງຂອງພຣະຕະຖາຄົດເຈົ້າ ເປັນມັກ ຜົນ ນິບພານ ໂສດາປັດຕິມັກ ໂສດາປັດຕິຜົນ ສະກະທາຄາມິມັກ ສະກະທາຄາມິຜົນ ອະນາຄາມິມັກ ອະນາຄາມິຜົນ ອະຣະຫັດຕະມັກ ອະຣະຫັດຕະຜົນ ສະຕິປັດຖານ ສຳມັບປະທານ ອິດທິບາດ ອິນຊີ ພະລະ ໂພດຊົງ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັຊາຢັ່ງຮູ້ຕາມຄວາມເປັນຈິງໃນຖານະ ແລະອະຖານະ ເປັນອະຣິຍະແມ່ນບໍ?

ປຣ. ແມ່ນ

ສກ. ກຳລັງຂອງພຣະຕະຖາຄົດເຈົ້າມີສູນຍະຕະ ເປັນອາລົມແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ກຳລັງຂອງພຣະຕະຖາຄົດເຈົ້າມີສູນຍະຕະເປັນອາລົມແມ່ນບໍ?

ປຣ. ແມ່ນ

ສກ. ພຣະຕະຖາຄົດຊົງໃຝ່ພຣະທະໄທເຖິງຖານະ ອະຖານະ ແລະສູນຍະຕະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ພຣະຕະຖາຄົດຊົງໃຝ່ພຣະທະໄທເຖິງຖານະ ອະຖານະ ແລະສູນຍະຕະແມ່ນບໍ?

ປຣ. ແມ່ນ

ສກ. ມີການປະຊຸມແຫ່ງຜັດສະ ໒ ຢ່າງ ຈິດ ໒ ດວງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ກຳລັງຂອງພຣະຕະຖາຄົດເຈົ້າຄືປັຊາຢັ່ງຮູ້ຕາມຄວາມເປັນຈິງໃນຖານະແລະອະຖານະເປັນອະຣິຍະແມ່ນບໍ?

ປຣ. ແມ່ນ

ສກ. ກຳລັງຂອງພຣະຕະຖາຄົດເຈົ້າມີອະນິມິດຕະເປັນອາລົມ ຯລຯ ມີອັບປະນິຫິຕະເປັນອາລົມແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກຳລັງຂອງພຣະຕະຖາຄົດເຈົ້າມີອັບປະນິຫິຕະເປັນອາລົມແມ່ນບໍ?

ປຣ. ແມ່ນ

ສກ. ພຣະຕະຖາຄົດຊົງໃຝ່ພຣະຫະໄທເຖິງຖານະ ອະຖານະ ແລະອັບປະນິຫິຕະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະຕະຖາຄົດເຈົ້າຊົງໃຝ່ພຣະຫະໄທເຖິງຖານະ ອະຖານະ ແລະອັບປະນິຫິຕະແມ່ນບໍ?

ປຣ. ແມ່ນ

ສກ. ມີການປະຊຸມແຫ່ງຜັດສະ ໔ ຢ່າງ ຈິດ ໔ ດວງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໓໕໗] ສກ. ສະຕິປັດຖານເປັນອະຣິຍະ ມີສູນຍະຕະເປັນອາລົມແມ່ນບໍ?

ປຣ. ແມ່ນ

ສກ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັນຍາຢັ່ງຮູ້ຕາມຄວາມເປັນຈິງໃນຖານະແລະອະຖານະ ເປັນອະຣິຍະ ມີສູນຍະຕະເປັນອາລົມແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະຕິປັດຖານເປັນອະຣິຍະ ມີອະນິມິດຕະເປັນອາລົມ ຯລຯ ມີອັບປະນິຫິຕະເປັນອາລົມແມ່ນບໍ?

ປຣ. ແມ່ນ

ສກ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັນຍາຢັ່ງຮູ້ຕາມຄວາມເປັນຈິງໃນຖານະແລະອະຖານະເປັນອະຣິຍະ ມີອັບປະນິຫິຕະເປັນອາລົມແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສຳມັບປະທານ ອິດທິບາດ ອິນຊີ ພະລະ ໂພດຊົງ ເປັນອະຣິຍະ ມີສູນຍະຕະເປັນອາລົມແມ່ນບໍ?

ປຣ. ແມ່ນ

ສກ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັນຍາຢັ່ງຮູ້ຕາມຄວາມເປັນຈິງໃນຖານະ ແລະອະຖານະ ເປັນອະຣິຍະ ມີສູນຍະຕະເປັນອາລົມແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂພດຊົງເປັນອະຣິຍະ ມີອະນິມິດຕະເປັນອາລົມ ມີອັບປະນິຫິຕະເປັນອາລົມແມ່ນບໍ?

ປຣ. ແມ່ນ

ສກ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັຊາຢັ່ງຮູ້ຕາມຄວາມເປັນຈິງໃນຖານະ ແລະອະຖານະ ເປັນອະຣິຍະ ມີອັບປະນິຫິຕະເປັນອາລົມແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

[໓໕໙] ສກ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັຊາຢັ່ງຮູ້ຕາມຄວາມເປັນຈິງໃນຖານະ ແລະອະຖານະເປັນອະຣິຍະ ແຕ່ທ່ານບໍ່ຍອມຮັບວ່າ "ມີສູນຍະຕະເປັນອາລົມ" ແມ່ນບໍ?

ປຣ. ແມ່ນ

ສກ. ສະຕິປັດຖານເປັນອະຣິຍະ ແຕ່ທ່ານບໍ່ຍອມຮັບວ່າ "ມີສູນຍະຕະເປັນອາລົມ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັຊາຢັ່ງຮູ້ຕາມຄວາມເປັນຈິງໃນຖານະແລະອະຖານະເປັນອະຣິຍະ ແຕ່ທ່ານບໍ່ຍອມຮັບວ່າ "ມີອະນິມິດຕະເປັນອາລົມ ມີອັບປະນິຫິຕະເປັນອາລົມ" ແມ່ນບໍ?

ປຣ. ແມ່ນ

ສກ. ສະຕິປັດຖານເປັນອະຣິຍະ ແຕ່ທ່ານບໍ່ຍອມຮັບວ່າ "ມີອັບປະນິຫິຕະເປັນອາລົມ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັຊາຢັ່ງຮູ້ຕາມຄວາມເປັນຈິງໃນຖານະແລະອະຖານະເປັນອະຣິຍະ ແຕ່ທ່ານບໍ່ຍອມຮັບວ່າ "ມີສູນຍະຕະເປັນອາລົມ ໆລໆ ມີອະນິມິດຕະເປັນອາລົມ ໆລໆ ມີອັບປະນິຫິຕະເປັນອາລົມ" ແມ່ນບໍ?

ປຣ. ແມ່ນ

ສກ. ສຳມັບປະທານ ໂພດຊົງເປັນອະຣິຍະ ແຕ່ທ່ານບໍ່ຍອມຮັບວ່າ "ມີອັບປະນິຫິຕະເປັນອາລົມ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

[໓໖໐] ສກ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັຊາຢັ່ງຮູ້ຕາມຄວາມເປັນຈິງໃນຈຸຕິແລະປະຕິສົນທິຂອງສັດທັງຫຼາຍເປັນອະຣິຍະແມ່ນບໍ?

ປຣ. ແມ່ນ

ສກ. ກຳລັງຂອງພຣະຕະຖາຄົດເຈົ້າເປັນມັກ ຜົນ ນິບພານ ໂສດາປັດຕິມັກ ໂສດາປັດຕິຜົນ ໆລໆ ໂພດຊົງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັຊາຢັ່ງຮູ້ຕາມຄວາມເປັນຈິງໃນຈຸຕິ ແລະປະຕິສົນທິຂອງສັດທັງຫຼາຍເປັນອະຣິຍະແມ່ນບໍ?

ປຣ. ແມ່ນ

ສກ. ກຳລັງຂອງພຣະຕະຖາຄົດເຈົ້າມີສູນຍະຕະເປັນອາລົມແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ກຳລັງຂອງພຣະຕະຖາຄົດເຈົ້າມີສູນຍະຕະເປັນອາລົມແມ່ນບໍ?

ປຣ. ແມ່ນ

ສກ. ພຣະຕະຖາຄົດຊົງໃຝ່ພຣະທະໄທເຖິງຈຸຕິ ປະຕິສົນທິຂອງສັດທັງຫຼາຍ ແລະສູນຍະຕະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ພຣະຕະຖາຄົດຊົງໃຝ່ພຣະທະໄທເຖິງຈຸຕິ ປະຕິສົນທິຂອງສັດທັງຫຼາຍ ແລະສູນຍະຕະແມ່ນບໍ?

ປຣ. ແມ່ນ

ສກ. ມີການປະຊຸມແຫ່ງຜັດສະ ๘ ຢ່າງ ຈິດ ๘ ດວງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັນຍາຢັ່ງຮູ້ຕາມຄວາມເປັນຈິງໃນຈຸຕິ ແລະປະຕິສົນທິຂອງສັດທັງຫຼາຍເປັນອະຣິຍະແມ່ນບໍ?

ປຣ. ແມ່ນ

ສກ. ກຳລັງຂອງພຣະຕະຖາຄົດເຈົ້າມີອະນິມິດຕະເປັນອາລົມ ฯລฯ ມີອັປປະນິຫິຕະເປັນອາລົມແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ກຳລັງຂອງພຣະຕະຖາຄົດເຈົ້າມີອັປປະນິຫິຕະເປັນອາລົມແມ່ນບໍ?

ປຣ. ແມ່ນ

ສກ. ພຣະຕະຖາຄົດເຈົ້າຊົງໃຝ່ພຣະທະໄທເຖິງຈຸຕິ ປະຕິສົນທິຂອງສັດທັງຫຼາຍ ແລະອັປປະນິຫິຕະ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ພຣະຕະຖາຄົດເຈົ້າຊົງໃຝ່ພຣະທະໄທເຖິງຈຸຕິ ປະຕິສົນທິຂອງສັດທັງຫຼາຍ ແລະອັປປະນິຫິຕະແມ່ນບໍ?

ປຣ. ແມ່ນ

ສກ. ມີການປະຊຸມແຫ່ງຜັດສະ ๘ ຢ່າງ ຈິດ ๘ ດວງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໓໖໑] ສກ. ສະຕິປັດຖານເປັນອະຣິຍະ ມີສູນຍະຕະເປັນອາລົມ ฯລฯ ມີອະນິມິດຕະເປັນອາລົມ ฯລฯ ມີອັປປະນິຫິຕະເປັນອາລົມແມ່ນບໍ?

ປຣ. ແມ່ນ

ສກ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັຊາຢັ່ງຮູ້ຕາມຄວາມເປັນຈິງໃນຈຸຕິ ແລະປະຕິສົນທິຂອງ ສັດທັງຫຼາຍເປັນອະຣິຍະ ມີອັບປະນິຫິຕະເປັນອາລົມແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສຳມັບປະທານ ຯລຯ ໂພດຊົງເປັນອະຣິຍະ ມີສູນຍະຕະເປັນອາລົມ ຯລຯ ມີອະນິມິດຕະເປັນອາລົມ ຯລຯ ມີອັບປະນິຫິຕະເປັນອາລົມແມ່ນບໍ?

ປຣ. ແມ່ນ

ສກ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັຊາຢັ່ງຮູ້ຕາມຄວາມເປັນຈິງໃນຈຸຕິແລະປະຕິສົນທິຂອງສັດທັງຫຼາຍເປັນອະຣິຍະ ມີອັບປະນິຫິຕະເປັນອາລົມແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັຊາຢັ່ງຮູ້ຕາມຄວາມເປັນຈິງໃນຈຸຕິ ແລະປະຕິສົນທິຂອງສັດທັງຫຼາຍເປັນອະຣິຍະ ແຕ່ທ່ານບໍ່ຍອມຮັບວ່າ "ມີສູນຍະຕະເປັນອາລົມ ຯລຯ ມີອະນິມິດຕະເປັນອາລົມ ຯລຯ ມີອັບປະນິຫິຕະເປັນອາລົມ" ແມ່ນບໍ?

ປຣ. ແມ່ນ

ສກ. ສະຕິປັດຖານເປັນອະຣິຍະ ແຕ່ທ່ານບໍ່ຍອມຮັບວ່າ "ມີອັບປະນິຫິຕະເປັນອາລົມ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໖໘] ສກ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັຊາຢັ່ງຮູ້ຕາມຄວາມເປັນຈິງໃນຈຸຕິແລະປະຕິສົນທິຂອງສັດທັງຫຼາຍເປັນອະຣິຍະ ແຕ່ທ່ານບໍ່ຍອມຮັບວ່າ "ມີສູນຍະຕະເປັນອາລົມ ຯລຯ ມີອະນິມິດຕະເປັນອາລົມ ຯລຯ ມີອັບປະນິຫິຕະເປັນອາລົມ" ແມ່ນບໍ?

ປຣ. ແມ່ນ

ສກ. ສຳມັບປະທານ ຯລຯ ໂພດຊົງເປັນອະຣິຍະ ແຕ່ທ່ານບໍ່ຍອມຮັບວ່າ "ມີອັບປະນິຫິຕະເປັນອາລົມ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັຊາຢັ່ງຮູ້ຕາມຄວາມເປັນຈິງໃນຄວາມສິ້ນໄປແຫ່ງອາສະວະເປັນອະຣິຍະແມ່ນບໍ?

ສກ. ແມ່ນ

ປຣ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັຊາຢັ່ງຮູ້ຕາມຄວາມເປັນຈິງໃນຖານະ ແລະອະຖານະ ເປັນອະຣິຍະແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັນຍາຢັ່ງຮູ້ຕາມຄວາມເປັນຈິງໃນຄວາມສິ້ນໄປແຫ່ງອາສະວະເປັນອະຣິຍະແມ່ນບໍ?

ສກ. ແມ່ນ

ປຣ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັນຍາຢັ່ງຮູ້ຕາມຄວາມເປັນຈິງໃນຈຸຕິແລະປະຕິສົນທິຂອງສັດທັງຫຼາຍເປັນອະຣິຍະແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັນຍາຢັ່ງຮູ້ຕາມຄວາມເປັນຈິງໃນຖານະແລະອະຖານະ ແຕ່ທ່ານບໍ່ຍອມຮັບວ່າ “ເປັນອະຣິຍະ” ແມ່ນບໍ?

ສກ. ແມ່ນ

ປຣ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັນຍາຢັ່ງຮູ້ຕາມຄວາມເປັນຈິງໃນຄວາມສິ້ນໄປແຫ່ງອາສະວະ ແຕ່ທ່ານບໍ່ຍອມຮັບວ່າ “ເປັນອະຣິຍະ” ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັນຍາຢັ່ງຮູ້ຕາມຄວາມເປັນຈິງໃນຈຸຕິແລະປະຕິສົນທິຂອງສັດທັງຫຼາຍ ແຕ່ທ່ານບໍ່ຍອມຮັບວ່າ “ເປັນອະຣິຍະ” ແມ່ນບໍ?

ສກ. ແມ່ນ

ປຣ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັນຍາຢັ່ງຮູ້ຕາມຄວາມເປັນຈິງໃນຄວາມສິ້ນໄປແຫ່ງອາສະວະ ແຕ່ທ່ານບໍ່ຍອມຮັບວ່າ “ເປັນອະຣິຍະ” ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັນຍາຢັ່ງຮູ້ຕາມຄວາມເປັນຈິງໃນຄວາມສິ້ນໄປແຫ່ງອາສະວະເປັນອະຣິຍະ ມີສູນຍະຕະເປັນອາລົມແມ່ນບໍ?

ສກ. ແມ່ນ

ປຣ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັນຍາຢັ່ງຮູ້ຕາມຄວາມເປັນຈິງໃນຖານະ ແລະອະຖານະ ເປັນອະຣິຍະ ມີສູນຍະຕະເປັນອາລົມແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັນຍາຢັ່ງຮູ້ຕາມຄວາມເປັນຈິງໃນຄວາມສິ້ນໄປແຫ່ງອາສະວະເປັນອະຣິຍະ ມີອະນິມິດຕະເປັນອາລົມ ຯລຯ ມີອັບປະນິຫິຕະເປັນອາລົມແມ່ນບໍ?

ສກ. ແມ່ນ

ປຣ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັນຍາຢັ່ງຮູ້ຕາມຄວາມເປັນຈິງໃນຖານະ ແລະອະຖານະ ເປັນອະຣິຍະ ມີອັບປະນິຫິຕະເປັນອາລົມແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັນຍາຢັ່ງຮູ້ຕາມຄວາມເປັນຈິງໃນຄວາມສິ້ນໄປ

ແຫ່ງອາສະວະເປັນອະຣິຍະ ມີສູນຍະຕະເປັນອາລົມ ໆລໆ ມີອະນິມິດຕະເປັນອາລົມ ໆລໆ ມີອັບປະນິຫິຕະເປັນອາລົມແມ່ນບໍ?

ສກ. ແມ່ນ ໆລໆ

ປຣ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັຊາຢັ່ງຮູ້ຕາມຄວາມເປັນຈິງໃນຈຸຕິແລະປະຕິສົນທິຂອງສັດທັງຫຼາຍເປັນອະຣິຍະ ມີອັບປະນິຫິຕະເປັນອາລົມແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ໆລໆ

ປຣ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັຊາຢັ່ງຮູ້ຕາມຄວາມເປັນຈິງໃນຖານະ ແລະອະຖານະ ເປັນອະຣິຍະ ແຕ່ທ່ານບໍ່ຍອມຮັບວ່າ "ມີສູນຍະຕະເປັນອາລົມ" ແມ່ນບໍ?

ສກ. ແມ່ນ

ປຣ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັຊາຢັ່ງຮູ້ຕາມຄວາມເປັນຈິງໃນຄວາມສິ້ນໄປແຫ່ງອາສະວະເປັນອະຣິຍະ ແຕ່ທ່ານບໍ່ຍອມຮັບວ່າ "ມີສູນຍະຕະເປັນອາລົມ" ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ໆລໆ

ປຣ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັຊາຢັ່ງຮູ້ຕາມຄວາມເປັນຈິງໃນຖານະ ແລະອະຖານະ ເປັນອະຣິຍະ ແຕ່ທ່ານບໍ່ຍອມຮັບວ່າ "ມີອະນິມິດຕະເປັນອາລົມ ມີອັບປະນິຫິຕະເປັນອາລົມ" ແມ່ນບໍ?

ສກ. ແມ່ນ

ປຣ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັຊາຢັ່ງຮູ້ຕາມຄວາມເປັນຈິງໃນຄວາມສິ້ນໄປແຫ່ງອາສະວະເປັນອະຣິຍະ ແຕ່ທ່ານບໍ່ຍອມຮັບວ່າ "ມີອັບປະນິຫິຕະເປັນອາລົມ" ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ໆລໆ

ປຣ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັຊາຢັ່ງຮູ້ຕາມຄວາມເປັນຈິງໃນຈຸຕິແລະປະຕິສົນທິຂອງສັດທັງຫຼາຍເປັນອະຣິຍະ ແຕ່ທ່ານບໍ່ຍອມຮັບວ່າ "ມີສູນຍະຕະເປັນອາລົມ ມີອະນິມິດຕະເປັນອາລົມ ມີອັບປະນິຫິຕະເປັນອາລົມ" ແມ່ນບໍ?

ສກ. ແມ່ນ

ປຣ. ກຳລັງຂອງພຣະຕະຖາຄົດເຈົ້າ ຄື ປັຊາຢັ່ງຮູ້ຕາມຄວາມເປັນຈິງໃນຄວາມສິ້ນໄປແຫ່ງອາສະວະເປັນອະຣິຍະ ແຕ່ທ່ານບໍ່ຍອມຮັບວ່າ "ມີອັບປະນິຫິຕະເປັນອາລົມ" ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ໆລໆ

**ອະຣິຍັນຕິກະຖາ ຈົບ**

# ໓. ວິມຸດຕິກະຖາ (໒໓)

## ວ່າດ້ວຍຄວາມລຸດພົ້ນ

[໓໗໓] ສກ. ຈິດມີຣາຄະລຸດພົ້ນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຈິດທີ່ປະກອບດ້ວຍຣາຄະ ເກີດພ້ອມກັບຣາຄະ ປະປົນດ້ວຍຣາຄະ ສໍາປະຍຸດດ້ວຍຣາຄະ ມີພ້ອມກັບຣາຄະ ເປັນໄປຕາມຣາຄະ ເປັນອະກຸສົນ ເປັນໂລກີຍະ ເປັນອາລົມຂອງອາສະວະ ເປັນອາລົມຂອງສັງໂຍດ ເປັນອາລົມຂອງຄັນຖະ ເປັນອາລົມຂອງໂອຄະ ເປັນອາລົມຂອງໂຍຄະ ເປັນອາລົມຂອງນິວອນ ເປັນອາລົມຂອງປະຣາມາດ ເປັນອາລົມຂອງອຸປາທານ ເປັນອາລົມຂອງສັງກິເລດ ລຸດພົ້ນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈິດມີຜັດສະລຸດພົ້ນໄດ້ ທັງຜັດສະແລະຈິດລຸດພົ້ນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຈິດມີຣາຄະລຸດພົ້ນໄດ້ ທັງຣາຄະ ແລະຈິດລຸດພົ້ນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈິດມີເວທະນາ ຯລຯ ມີສັນຍາ ຯລຯ ມີເຈຕະນາ ຯລຯ ມີປັນຍາລຸດພົ້ນໄດ້ ທັງປັນຍາແລະຈິດລຸດພົ້ນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຈິດມີຣາຄະລຸດພົ້ນໄດ້ ທັງຣາຄະແລະຈິດລຸດພົ້ນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈິດມີຜັດສະ ມີຣາຄະລຸດພົ້ນໄດ້ ທັງຜັດສະແລະຈິດລຸດພົ້ນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທັງຣາຄະ ແລະຈິດລຸດພົ້ນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈິດມີເວທະນາ ມີຣາຄະ ຯລຯ ມີສັນຍາ ມີຣາຄະ ຯລຯ ມີເຈຕະນາ ມີຣາຄະ ຯລຯ ມີປັນຍາ ມີຣາຄະລຸດພົ້ນໄດ້ ທັງປັນຍາ ແລະຈິດລຸດພົ້ນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທັງຣາຄະແລະຈິດລຸດພົ້ນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໓໗໔] ສກ. ຈິດມີໂທສະລຸດພົ້ນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຈິດທີ່ປະກອບດ້ວຍໂທສະ ເກີດພ້ອມກັບໂທສະ ຜະສົມດ້ວຍໂທສະ ສຳປະຍຸດດ້ວຍ ໂທສະ ມີພ້ອມກັບໂທສະ ເປັນໄປຕາມໂທສະ ເປັນອະກຸສົນ ເປັນໂລກິຍະ ເປັນອາລົມຂອງອາສະວະ ຯລຯ ເປັນອາລົມຂອງສັງກິເລດລຸດພົ້ນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈິດມີຜັດສະລຸດພົ້ນໄດ້ ທັງຜັດສະແລະຈິດລຸດພົ້ນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຈິດມີໂທສະລຸດພົ້ນໄດ້ ທັງໂທສະແລະຈິດລຸດພົ້ນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈິດມີເວທະນາ ຯລຯ ມີສັນຍາ ຯລຯ ມີເຈຕະນາ ຯລຯ ມີປັນຍາລຸດພົ້ນໄດ້ ທັງປັນຍາແລະຈິດລຸດພົ້ນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຈິດມີໂທສະລຸດພົ້ນໄດ້ ທັງໂທສະແລະຈິດລຸດພົ້ນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈິດມີຜັດສະ ມີໂທສະລຸດພົ້ນໄດ້ ທັງຜັດສະແລະຈິດລຸດພົ້ນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຈິດມີໂທສະລຸດພົ້ນໄດ້ ທັງໂທສະແລະຈິດລຸດພົ້ນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈິດມີເວທະນາ ມີໂທສະ ຯລຯ ມີສັນຍາ ມີໂທສະ ຯລຯ ມີເຈຕະນາ ມີໂທສະ ຯລຯ ມີປັນຍາ ມີໂທສະລຸດພົ້ນໄດ້ ທັງປັນຍາແລະຈິດລຸດພົ້ນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທັງໂທສະແລະຈິດລຸດພົ້ນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໓໙໕] ສກ. ຈິດມີໂມຫະລຸດພົ້ນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຈິດທີ່ປະກອບດ້ວຍໂມຫະ ເກີດພ້ອມກັບໂມຫະ ຜະສົມດ້ວຍໂມຫະ ສຳປະຍຸດດ້ວຍໂມຫະ ມີພ້ອມກັບໂມຫະ ເປັນໄປຕາມໂມຫະ ເປັນອະກຸສົນ ເປັນໂລກິຍະ ເປັນອາລົມຂອງອາສະວະ ຯລຯ ເປັນອາລົມຂອງສັງກິເລດລຸດພົ້ນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈິດມີຜັດສະລຸດພົ້ນໄດ້ ທັງຜັດສະແລະຈິດລຸດພົ້ນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຈິດມີໂມຫະລຸດພົ້ນໄດ້ ທັງໂມຫະແລະຈິດລຸດພົ້ນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈິດມີເວທະນາ ຯລຯ ມີສັນຍາ ຯລຯ ມີເຈຕະນາ ຯລຯ ມີປັນຍາລຸດພົ້ນໄດ້ ທັງປັນຍາແລະຈິດລຸດພົ້ນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຈິດມີໂມຫະລຸດພົ້ນໄດ້ ທັງໂມຫະແລະຈິດລຸດພົ້ນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈິດມີຜັດສະ ມີໂມຫະລຸດພົ້ນໄດ້ ທັງຜັດສະແລະຈິດລຸດພົ້ນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທັງໂມຫະແລະຈິດລຸດພົ້ນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈິດມີເວທະນາ ມີໂມຫະ ຯລຯ ມີສັນຍາ ມີໂມຫະ ຯລຯ ມີເຈຕະນາ ມີໂມຫະ ຯລຯ ມີປັນຍາ ມີໂມຫະລຸດພົ້ນໄດ້ ທັງປັນຍາແລະຈິດລຸດພົ້ນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທັງໂມຫະ ແລະຈິດລຸດພົ້ນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈິດມີຣາຄະ ມີໂທສະ ມີໂມຫະລຸດພົ້ນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຈິດທີ່ປາສະຈາກຣາຄະ ໂທສະ ໂມຫະ ໝົດກິເລດລຸດພົ້ນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ຈິດມີຣາຄະ ມີໂທສະ ມີໂມຫະລຸດພົ້ນໄດ້"

**ວິມຸດຕິກະຖາ ຈົບ**

## ໔. ວິມຸດຈະມານະກະຖາ (໔໔)

## ວ່າດ້ວຍຈິດກຳລັງລຸດພົ້ນ

[໓໙໙] ສກ. ຈິດທີ່ລຸດພົ້ນແລ້ວ ຊື່ວ່າກຳລັງລຸດພົ້ນແມ່ນບໍ?

ປຣ. ແມ່ນ

ສກ. ຈິດທີ່ລຸດພົ້ນແລ້ວສ່ວນໜຶ່ງ ອີກສ່ວນໜຶ່ງຍັງບໍ່ລຸດພົ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈິດທີ່ລຸດພົ້ນແລ້ວສ່ວນໜຶ່ງ ອີກສ່ວນໜຶ່ງຍັງບໍ່ລຸດພົ້ນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນເປັນພຣະໂສດາບັນສ່ວນໜຶ່ງ ອີກສ່ວນໜຶ່ງບໍ່ເປັນພຣະໂສດາບັນ ເປັນຜູ້ເຖິງ ໄດ້ ບັນລຸ ເຮັດໃຫ້ແຈ້ງ ເຂົ້າເຖິງຢູ່ ສໍາຜັດໂສດາປັດຕິຜົນດ້ວຍກາຍຢູ່ສ່ວນໜຶ່ງ ອີກສ່ວນໜຶ່ງບໍ່ສໍາຜັດດ້ວຍກາຍຢູ່ ເປັນພຣະໂສດາບັນຜູ້ສັດຕັກຂັດຕຸປະຣະມະ ໂກລັງໂກລະ ເອກະພິຊີ ປະກອບດ້ວຍຄວາມເຫຼື້ອມໃສທີ່ບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າ ຯລຯ ໃນພຣະທໍາ ຯລຯ ໃນພຣະສົງ ຯລຯ ປະກອບດ້ວຍສິນທີ່ພຣະອະຣິຍະພໍໃຈ ສ່ວນໜຶ່ງ ອີກສ່ວນໜຶ່ງບໍ່ປະກອບດ້ວຍສິນທີ່ພຣະອະຣິຍະພໍໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈິດທີ່ລຸດພົ້ນແລ້ວສ່ວນໜຶ່ງ ອີກສ່ວນໜຶ່ງຍັງບໍ່ລຸດພົ້ນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນເປັນພຣະສະກະທາຄາມີສ່ວນໜຶ່ງ ອີກສ່ວນໜຶ່ງບໍ່ເປັນພຣະສະກະທາຄາມີ ເປັນຜູ້ເຖິງ ໄດ້ ບັນລຸ ເຮັດໃຫ້ແຈ້ງ ເຂົ້າເຖິງຢູ່ ສໍາຜັດສະກະທາຄາມິຜົນດ້ວຍກາຍຢູ່ສ່ວນໜຶ່ງ ອີກສ່ວນໜຶ່ງບໍ່ສໍາຜັດດ້ວຍກາຍຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈິດທີ່ລຸດພົ້ນແລ້ວສ່ວນໜຶ່ງ ອີກສ່ວນໜຶ່ງຍັງບໍ່ລຸດພົ້ນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນເປັນພຣະອະນາຄາມີສ່ວນໜຶ່ງ ອີກສ່ວນໜຶ່ງບໍ່ເປັນພຣະອະນາຄາມີ ເປັນ

ຜູ້ເຖິງ ໄດ້ ບັນລຸ ເຮັດໃຫ້ແຈ້ງ ເຂົ້າເຖິງຢູ່ ສໍາຜັດອະນາຄາມິຜົນດ້ວຍກາຍຢູ່ສ່ວນໜຶ່ງ ອີກສ່ວນໜຶ່ງບໍ່ສໍາຜັດດ້ວຍກາຍຢູ່ ເປັນພຣະອະນາຄາມີຜູ້ອັນຕະຣາປະຣິນິບພາຍີ ຯລຯ ຜູ້ອຸປະຫັດຈະປະຣິນິບພາຍີ ຯລຯ ຜູ້ອະສັງຂາຣະປະຣິນິບພາຍີ ຯລຯ ຜູ້ສະສັງຂາຣະປະຣິນິບພາຍີ ຯລຯ ຜູ້ອຸດທັງໂສໂຕອະກະນິດຖະຄາມີສ່ວນໜຶ່ງ ອີກສ່ວນໜຶ່ງບໍ່ເປັນພຣະອະນາຄາມີຜູ້ອຸດທັງໂສໂຕອະກະນິດຖະຄາມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈິດລຸດພົ້ນແລ້ວສ່ວນໜຶ່ງ ອີກສ່ວນໜຶ່ງຍັງບໍ່ລຸດພົ້ນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນເປັນພຣະອະຣະຫັນສ່ວນໜຶ່ງ ອີກສ່ວນໜຶ່ງບໍ່ເປັນພຣະອະຣະຫັນ ເປັນຜູ້ເຖິງ ໄດ້ ບັນລຸ ເຮັດໃຫ້ແຈ້ງ ເຂົ້າເຖິງຢູ່ ສໍາຜັດອະຣະຫັດຕະຜົນດ້ວຍກາຍຢູ່ສ່ວນໜຶ່ງ ອີກສ່ວນໜຶ່ງບໍ່ສໍາຜັດດ້ວຍກາຍຢູ່ ເປັນຜູ້ປາສະຈາກຣາຄະ ໂທສະ ໂມຫະ ຯລຯ ເຮັດໃຫ້ແຈ້ງທໍາທີ່ຄວນເຮັດໃຫ້ແຈ້ງສ່ວນໜຶ່ງ ອີກສ່ວນໜຶ່ງບໍ່ເຮັດໃຫ້ແຈ້ງທໍາທີ່ຄວນເຮັດໃຫ້ແຈ້ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈິດທີ່ລຸດພົ້ນແລ້ວ ຊື່ວ່າກຳລັງລຸດພົ້ນແມ່ນບໍ?

ປຣ. ແມ່ນ

ສກ. ຈິດລຸດພົ້ນແລ້ວໃນຂະນະເກີດ ຊື່ວ່າກຳລັງລຸດພົ້ນໃນຂະນະດັບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[ຜຜກ] ປຣ. ທ່ານບໍ່ຍອມຮັບວ່າ "ຈິດທີ່ລຸດພົ້ນແລ້ວ ຊື່ວ່າກຳລັງລຸດພົ້ນ" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ເມື່ອບຸກຄົນນັ້ນຮູ້ເຫັນຢູ່ແນວນີ້ ຈິດຍ່ອມລຸດພົ້ນຈາກກາມາສະວະແດ່ ຈາກພະວາສະວະແດ່ ຈາກອະວິດຊາສະວະແດ່" ໑ ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ຈິດທີ່ລຸດພົ້ນແລ້ວຈຶ່ງຊື່ວ່າກຳລັງລຸດພົ້ນ

ສກ. ຈິດທີ່ລຸດພົ້ນແລ້ວ ຊື່ວ່າກຳລັງລຸດພົ້ນແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ບຸກຄົນນັ້ນ ເມື່ອຈິດເປັນສະມາທິບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ ຍ່ອມນ້ອມຈິດໄປເພື່ອຍານເປັນເຄື່ອງສິ້ນອາສະວະ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ຈິດທີ່ລຸດພົ້ນແລ້ວ ຊື່ວ່າກຳລັງລຸດພົ້ນ"

ສກ. ຈິດທີ່ກຳລັງລຸດພົ້ນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຈິດທີ່ກຳລັງກຳໜັດ ຂັດເຄືອງ ຫຼົງ ເສົ້າໝອງມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈິດທີ່ກຳໜັດແລະບໍ່ກຳໜັດ ຂັດເຄືອງ ແລະບໍ່ຂັດເຄືອງ ຫຼົງແລະບໍ່ຫຼົງ ຂາດແລະບໍ່ຂາດ ແຕກດັບແລະບໍ່ແຕກດັບ ຖືກປັດໄຈປຸງແຕ່ງແລະບໍ່ຖືກປັດໄຈປຸງແຕ່ງ ມີຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຈິດທີ່ກຳໜັດແລະບໍ່ກຳໜັດ ຂັດເຄືອງແລະບໍ່ຂັດເຄືອງ ຫຼົງແລະບໍ່ຫຼົງ ຂາດແລະບໍ່ຂາດ ແຕກດັບແລະບໍ່ແຕກດັບ ຖືກປັດໄຈປຸງແຕ່ງແລະບໍ່ຖືກປັດໄຈປຸງແຕ່ງມີຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ຈິດທີ່ກຳລັງລຸດພົ້ນມີຢູ່"

**ວິມຸດຈະມານະກະຖາ ຈົບ**

# ໕. ອັດຖະມະກະກະຖາ (໔໕)

## ວ່າດ້ວຍບຸກຄົນທີ ໘

[໓໙໘] ສກ. ບຸກຄົນທີ ໘ ລະທິດຖິປະຣິຍຸດຖານໄດ້ແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນທີ ໘ ເປັນພຣະໂສດາບັນ ເປັນຜູ້ເຖິງ ໄດ້ ບັນລຸ ເຮັດໃຫ້ແຈ້ງ ເຂົ້າເຖິງຢູ່ ສຳຜັດໂສດາປັດຕິຜົນດ້ວຍກາຍຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນທີ ໘ ລະວິຈິກິດສາປະຣິຍຸດຖານໄດ້ແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນທີ ໘ ເປັນພຣະໂສດາບັນ ເປັນຜູ້ເຖິງ ຯລຯ ສຳຜັດໂສດາປັດຕິຜົນດ້ວຍກາຍຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນທີ ໘ ລະທິດຖິປະຣິຍຸດຖານໄດ້ແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນທີ ໘ ລະທິດຖານຸໄສໄດ້ແລ້ວແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນທີ ໘ ລະທິດຖິປະຣິຍຸດຖານໄດ້ແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນທີ ໘ ລະວິຈິກິດສານຸໄສ ຯລຯ ສີລັບພະຕະປະຣາມາດໄດ້ແລ້ວແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນທີ ໘ ລະວິຈິກິດສາປະຣິຍຸດຖານໄດ້ແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນທີ ໘ ລະວິຈິກິດສານຸໄສໄດ້ແລ້ວແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນທີ ໘ ລະວິຈິກິດສາປະຣິຍຸດຖານໄດ້ແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນທີ ໘ ລະທິດຖານຸໄສ ຯລຯ ສີລັບພະຕະປະຣາມາດໄດ້ແລ້ວແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນທີ ໘ ຍັງລະທິດຖານຸໄສບໍ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນທີ ๓ ຍັງລະທິດຖິປະຣິຍຸດຖານບໍ່ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ບຸກຄົນທີ ๓ ຍັງລະທິດຖານຸໄສບໍ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນທີ ๓ ຍັງລະວິຈິກິດສາປະຣິຍຸດຖານບໍ່ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ບຸກຄົນທີ ๓ ຍັງລະວິຈິກິດສານຸໄສ ฯລฯ ສີລັບພະຕະປະຣາມາດບໍ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນທີ ๓ ຍັງລະທິດຖິປະຣິຍຸດຖານບໍ່ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ບຸກຄົນທີ ๓ ຍັງລະສີລັບພະຕະປະຣາມາດບໍ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນທີ ๓ ຍັງລະວິຈິກິດສາປະຣິຍຸດຖານບໍ່ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໓໖໘] ສກ. ບຸກຄົນທີ ๓ ລະທິດຖິປະຣິຍຸດຖານໄດ້ແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນທີ ๓ ຈະເລີນມັກເພື່ອລະທິດຖິປະຣິຍຸດຖານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ບຸກຄົນທີ ๓ ລະທິດຖິປະຣິຍຸດຖານໄດ້ແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນທີ ๓ ຈະເລີນສະຕິປັດຖານ ฯລฯ ສຳມັບປະທານ ฯລฯ ໂພດຊົງ ເພື່ອລະທິດຖິປະຣິຍຸດຖານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ບຸກຄົນທີ ๓ ລະວິຈິກິດສາປະຣິຍຸດຖານໄດ້ແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນທີ ๓ ຈະເລີນມັກ ฯລฯ ຈະເລີນໂພດຊົງ ເພື່ອລະວິຈິກິດສາປະຣິຍຸດຖານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ບຸກຄົນທີ ๓ ບໍ່ຈະເລີນມັກເພື່ອລະທິດຖິປະຣິຍຸດຖານແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນທີ ໗ ລະທິດຖິປະຣິຍຸດຖານໄດ້ແລ້ວດ້ວຍສະພາວະທຳທີ່ບໍ່ແມ່ນມັກ ເປັນໂລກິຍະ ເປັນອາລົມຂອງອາສະວະ ຯລຯ ເປັນອາລົມຂອງສັງກິເລດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນທີ ໗ ບໍ່ຈະເລີນສະຕິປັດຖານ ຯລຯ ບໍ່ຈະເລີນໂພດຊົງ ເພື່ອລະທິດຖິປະຣິຍຸດຖານແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນທີ ໗ ລະທິດຖິປະຣິຍຸດຖານໄດ້ແລ້ວດ້ວຍສະພາວະທຳທີ່ບໍ່ແມ່ນມັກ ເປັນໂລກິຍະ ເປັນອາລົມຂອງອາສະວະ ຯລຯ ເປັນອາລົມຂອງສັງກິເລດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນທີ ໗ ບໍ່ຈະເລີນມັກ ຯລຯ ບໍ່ຈະເລີນສະຕິປັດຖານ ຯລຯ ບໍ່ຈະເລີນໂພດຊົງ ເພື່ອລະວິຈິກິດສາປະຣິຍຸດຖານແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນທີ ໗ ລະວິຈິກິດສາປະຣິຍຸດຖານໄດ້ແລ້ວດ້ວຍສະພາວະທຳທີ່ບໍ່ແມ່ນມັກ ເປັນໂລກິຍະ ເປັນອາລົມຂອງອາສະວະ ຯລຯ ເປັນອາລົມຂອງສັງກິເລດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໓໗໐] ປຣ. ທ່ານບໍ່ຍອມຮັບວ່າ "ບຸກຄົນທີ ໗ ລະທິດຖິປະຣິຍຸດຖານໄດ້ແລ້ວ" ແມ່ນບໍ?

ສກ. ແມ່ນ

ປຣ. ທິດຖິປະຣິຍຸດຖານຈັກເກີດຂຶ້ນແມ່ນບໍ?

ສກ. ຈັກບໍ່ເກີດຂຶ້ນ

ປຣ. ຫາກຈັກບໍ່ເກີດຂຶ້ນ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ບຸກຄົນທີ ໗ ລະທິດຖິປະຣິຍຸດຖານໄດ້ແລ້ວ"

ປຣ. ທ່ານບໍ່ຍອມຮັບວ່າ "ບຸກຄົນທີ ໗ ລະວິຈິກິດສາປະຣິຍຸດຖານໄດ້ແລ້ວ" ແມ່ນບໍ?

ສກ. ແມ່ນ

ປຣ. ວິຈິກິດສາປະຣິຍຸດຖານຈັກເກີດຂຶ້ນແມ່ນບໍ?

ສກ. ຈັກບໍ່ເກີດຂຶ້ນ

ປຣ. ຫາກຈັກບໍ່ເກີດຂຶ້ນ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ບຸກຄົນທີ ໗ ລະວິຈິກິດສາປະຣິຍຸດຖານໄດ້ແລ້ວ"

ສກ. ຍ້ອນທ່ານເຂົ້າໃຈວ່າ "ທິດຖິປະຣິຍຸດຖານຈັກບໍ່ເກີດຂຶ້ນແກ່ບຸກຄົນທີ ໗" ຈຶ່ງຍອມຮັບວ່າ "ບຸກຄົນທີ ໗ ລະທິດຖິປະຣິຍຸດຖານໄດ້ແລ້ວ" ແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນທ່ານເຂົ້າໃຈວ່າ "ທິດຖານຸໄສຈັກບໍ່ເກີດຂຶ້ນແກ່ບຸກຄົນທີ ๗" ຈຶ່ງຍອມຮັບວ່າ "ບຸກຄົນທີ ๗ ລະທິດຖານຸໄສໄດ້ແລ້ວ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຍ້ອນທ່ານເຂົ້າໃຈວ່າ "ທິດຖິປະຣິຍຸດຖານຈັກບໍ່ເກີດຂຶ້ນແກ່ບຸກຄົນທີ ๗" ຈຶ່ງຍອມຮັບວ່າ "ບຸກຄົນທີ ๗ ລະທິດຖິປະຣິຍຸດຖານໄດ້ແລ້ວ" ແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນທ່ານເຂົ້າໃຈວ່າ "ວິຈິກິດສານຸໄສ ຯລຯ ສີລັບພະຕະປະຣາມາດຈັກບໍ່ເກີດຂຶ້ນແກ່ບຸກຄົນທີ ๗" ຈຶ່ງຍອມຮັບວ່າ "ບຸກຄົນທີ ๗ ລະວິຈິກິດສານຸໄສ ຯລຯ ສີລັບພະຕະປະຣາມາດໄດ້ແລ້ວ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຍ້ອນທ່ານເຂົ້າໃຈວ່າ "ວິຈິກິດສາປະຣິຍຸດຖານຈັກບໍ່ເກີດຂຶ້ນແກ່ບຸກຄົນທີ ๗" ຈຶ່ງຍອມຮັບວ່າ "ບຸກຄົນທີ ๗ ລະວິຈິກິດສາປະຣິຍຸດຖານໄດ້ແລ້ວ" ແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນທ່ານເຂົ້າໃຈວ່າ "ວິຈິກິດສາ ຯລຯ ສີລັບພະຕະປະຣາມາດ ຈັກບໍ່ເກີດຂຶ້ນແກ່ບຸກຄົນທີ ๗" ຈຶ່ງຍອມຮັບວ່າ "ບຸກຄົນທີ ๗ ລະວິຈິກິດສານຸໄສ ຯລຯ ສີລັບພະຕະປະຣາມາດໄດ້ແລ້ວ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຍ້ອນທ່ານເຂົ້າໃຈວ່າ "ທິດຖິປະຣິຍຸດຖານຈັກບໍ່ເກີດຂຶ້ນແກ່ບຸກຄົນທີ ๗" ຈຶ່ງຍອມຮັບວ່າ "ບຸກຄົນທີ ๗ ລະທິດຖິປະຣິຍຸດຖານໄດ້ແລ້ວ" ແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນທ່ານເຂົ້າໃຈວ່າ "ທິດຖິປະຣິຍຸດຖານຈັກບໍ່ເກີດຂຶ້ນແກ່ໂຄຕະຣະພູບຸກຄົນ" ຈຶ່ງຍອມຮັບວ່າ "ໂຄຕະຣະພູບຸກຄົນລະທິດຖິປະຣິຍຸດຖານໄດ້ແລ້ວ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຍ້ອນທ່ານເຂົ້າໃຈວ່າ "ວິຈິກິດສາປະຣິຍຸດຖານຈັກບໍ່ເກີດຂຶ້ນແກ່ບຸກຄົນທີ ๗" ຈຶ່ງຍອມຮັບວ່າ "ບຸກຄົນທີ ๗ ລະວິຈິກິດສາປະຣິຍຸດຖານໄດ້ແລ້ວ" ແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນທ່ານເຂົ້າໃຈວ່າ "ວິຈິກິດສາປະຣິຍຸດຖານຈັກບໍ່ເກີດຂຶ້ນແກ່ໂຄຕະຣະພູບຸກຄົນ" ຈຶ່ງຍອມຮັບວ່າ "ໂຄຕະຣະພູບຸກຄົນລະວິຈິກິດສາປະຣິຍຸດຖານໄດ້ແລ້ວ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

**ອັດຖະມະກະກະຖາ ຈົບ**

# ໖. ອັດຖະມະກັດສະອິນທະຣິຍະກະຖາ (໔໖)

## ວ່າດ້ວຍອິນຊີຂອງບຸກຄົນທີ ໆ

[໓໗໑] ສກ. ບຸກຄົນທີ ໆ ບໍ່ມີສັດທິນຊີແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນທີ ໆ ບໍ່ມີສັດທາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນທີ ໆ ບໍ່ມີວິຣິຍິນຊີ ຯລຯ ບໍ່ມີສະຕິນຊີ ຯລຯ ບໍ່ມີສະມາທິນຊີ ຯລຯ ບໍ່ມີປັນຍິນຊີແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນທີ ໆ ບໍ່ມີປັນຍາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນທີ ໆ ມີສັດທາແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນທີ ໆ ມີສັດທິນຊີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນທີ ໆ ມີວິຣິຍະ ຯລຯ ມີສະຕິ ຯລຯ ມີສະມາທິ ຯລຯ ມີປັນຍາແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນທີ ໆ ມີປັນຍິນຊີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນທີ ໆ ມີມະໂນ ມີມະນິນຊີແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນທີ ໆ ມີສັດທາ ມີສັດທິນຊີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນທີ ໆ ມີມະໂນ ມີມະນິນຊີແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນທີ ໆ ມີປັນຍາ ມີປັນຍິນຊີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນທີ ໆ ມີໂສມະນັດ ມີໂສມະນັດສິນຊີ ຯລຯ ມີຊີວິດ ມີຊີວິຕິນຊີແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນທີ ໆ ມີສັດທາ ມີສັດທິນຊີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນທີ ໗ ມີຊີວິດ ມີຊີວິຕິນຊີແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນທີ ໗ ມີວິຣິຍະ ຯລຯ ມີປັນຍາ ມີປັນຍິນຊີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນທີ ໗ ມີສັດທາ ແຕ່ບໍ່ມີສັດທິນຊີແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນທີ ໗ ມີມະໂນ ແຕ່ບໍ່ມີມະນິນຊີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນທີ ໗ ມີສັດທາ ແຕ່ບໍ່ມີສັດທິນຊີແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນທີ ໗ ມີໂສມະນັດ ແຕ່ບໍ່ມີໂສມະນັດສິນຊີ ຯລຯ ມີຊີວິດ ແຕ່ບໍ່ມີຊີວິຕິນຊີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນທີ ໗ ມີປັນຍາ ແຕ່ບໍ່ມີປັນຍິນຊີແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນທີ ໗ ມີມະໂນ ແຕ່ບໍ່ມີມະນິນຊີ ຯລຯ ມີໂສມະນັດ ແຕ່ບໍ່ມີໂສມະນັດສິນຊີ ຯລຯ ມີຊີວິດ ແຕ່ບໍ່ມີຊີວິຕິນຊີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນທີ ໗ ບໍ່ມີສັດທິນຊີແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນທີ ໗ ບໍ່ມີສັດທາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນທີ ໗ ບໍ່ມີວິຣິຍິນຊີແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນທີ ໗ ເປັນຜູ້ຂີ້ຄ້ານ ມີຄວາມພຽນຫຍໍ້ຍ່ອນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນທີ ໗ ບໍ່ມີສະຕິນຊີແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນທີ ໗ ເປັນຜູ້ຫຼົງລືມສະຕິ ບໍ່ມີສຳປະຊັນຍະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນທີ ໙ ບໍ່ມີສະມາທິນຊີແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນທີ ໙ ເປັນຜູ້ບໍ່ມີສະມາທິ ມີຈິດຫວັ່ນໄຫວແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນທີ ໙ ບໍ່ມີປັນຍິນຊີແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນທີ ໙ ເປັນຜູ້ດ້ອຍປັນຍາ ເປັນຜູ້ໜວກກືກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນທີ ໙ ມີສັດທາ ແລະສັດທານັ້ນເປັນເຫດນຳອອກຈາກທຸກແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນທີ ໙ ມີສັດທາ ແລະສັດທານັ້ນເປັນເຫດນຳອອກຈາກທຸກ ທ່ານກໍບໍ່ຄວນຍອມຮັບວ່າ “ບຸກຄົນທີ ໙ ບໍ່ມີສັດທິນຊີ”

ສກ. ບຸກຄົນທີ ໙ ມີຄວາມພຽນ ແລະຄວາມພຽນນັ້ນເປັນເຫດນຳອອກຈາກທຸກ ຯລຯ ມີສະຕິ ແລະສະຕິນັ້ນເປັນເຫດນຳອອກຈາກທຸກ ຯລຯ ມີສະມາທິ ແລະສະມາທິນັ້ນເປັນເຫດນຳອອກຈາກທຸກ ຯລຯ ມີປັນຍາ ແລະປັນຍານັ້ນເປັນເຫດນຳອອກຈາກທຸກແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນທີ ໙ ມີປັນຍາ ແລະປັນຍານັ້ນເປັນເຫດນຳອອກຈາກທຸກ ທ່ານກໍບໍ່ຄວນຍອມຮັບວ່າ “ບຸກຄົນທີ ໙ ບໍ່ມີປັນຍິນຊີ”

[໓໗໔] ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມີຜົນ ມີສັດທາ ມີສັດທິນຊີແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນທີ ໙ ມີສັດທາ ມີສັດທິນຊີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມີຜົນ ມີປັນຍາ ມີປັນຍິນຊີແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນທີ ໙ ມີປັນຍາ ມີປັນຍິນຊີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມີຜົນ ຯລຯ ເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ມີສັດທາ ມີສັດທິນຊີ ຯລຯ ມີປັນຍາ ມີປັນຍິນຊີແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນທີ ໙ ມີປັນຍາ ມີປັນຍິນຊີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນທີ ๗ ມີສັດທາ ແຕ່ບໍ່ມີສັດທິນຊີແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມິຜົນ ມີສັດທາ ແຕ່ບໍ່ມີສັດທິນຊີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນທີ ๗ ມີປັນຍາ ແຕ່ບໍ່ມີປັນຍິນຊີແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມິຜົນ ມີປັນຍາ ແຕ່ບໍ່ມີປັນຍິນຊີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນທີ ๗ ມີສັດທາ ແຕ່ບໍ່ມີສັດທິນຊີ ຯລຯ ມີປັນຍາ ແຕ່ບໍ່ມີປັນຍິນຊີແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ ຯລຯ ອະຣະຫັດຕະຜົນ ມີປັນຍາ ແຕ່ບໍ່ມີປັນຍິນຊີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນທີ ๗ ບໍ່ມີອິນຊີ ໕ ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້ ໕ ປະການອັນໃດແດ່ ຄື (໑) ສັດທິນຊີ (໒) ວິຣິຍິນຊີ (໓) ສະຕິນຊີ (໔) ສະມາທິນຊີ (໕) ປັນຍິນຊີ ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້ແລ ບຸກຄົນ ເປັນພຣະອະຣະຫັນຍ້ອນມີອິນຊີ ໕ ປະການນີ້ຄົບຖ້ວນບໍລິບູນ ເປັນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ຍ້ອນມີອິນຊີອ່ອນກວ່າພຣະອະຣະຫັນນັ້ນ ເປັນພຣະອະນາຄາມີ ຍ້ອນມີອິນຊີອ່ອນກວ່າຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນນັ້ນ ເປັນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ ຍ້ອນມີອິນຊີອ່ອນກວ່າພຣະອະນາຄາມີນັ້ນ ເປັນພຣະສະກະທາຄາມີ ຍ້ອນມີອິນຊີອ່ອນກວ່າຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນນັ້ນ ເປັນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມິຜົນ ຍ້ອນມີອິນຊີອ່ອນກວ່າພຣະສະກະທາຄາມີນັ້ນ ເປັນພຣະໂສດາບັນ ຍ້ອນມີອິນຊີອ່ອນກວ່າຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມິຜົນນັ້ນ ເປັນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ ຍ້ອນມີອິນຊີອ່ອນກວ່າພຣະໂສດາບັນນັ້ນ ພິກຂຸທັງຫຼາຍ ຜູ້ໃດບໍ່ມີອິນຊີ ໕ ປະການນີ້ ໂດຍປະການທັງປວງ ຜູ້ນັ້ນເຮົາຮຽກວ່າ ເປັນຄົນພາຍນອກ ຕັ້ງຢູ່ໃນຝ່າຍປຸຖຸຊົນ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນທີ ໗ ເປັນຄົນພາຍນອກ ຕັ້ງຢູ່ໃນຝ່າຍປຸຖຸຊົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ດັ່ງນັ້ນ ບຸກຄົນທີ ໗ ຈຶ່ງມີອິນຊີ ໕

**ອັດຖະມະກັດສະອິນທະຣິຍະກະຖາ ຈົບ**

# ໆ. ທິບພະຈັກຂຸກະຖາ (໔ກ)

## ວ່າດ້ວຍທິບພະຈັກຂຸ

[໓໗໓] ສກ. ມັງສະຈັກຂຸ (ຕາເນື້ອ) ທີ່ທຳອຸບປະຖຳແລ້ວເປັນທິບພະຈັກຂຸ (ຕາທິບ) ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ມັງສະຈັກຂຸຄືທິບພະຈັກຂຸ ທິບພະຈັກຂຸກໍຄືມັງສະຈັກຂຸແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ມັງສະຈັກຂຸທີ່ທຳອຸບປະຖຳແລ້ວເປັນທິບພະຈັກຂຸໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ມັງສະຈັກຂຸມີສະພາບແນວໃດ ທິບພະຈັກຂຸກໍມີສະພາບແນວນັ້ນ ທິບພະຈັກຂຸມີສະພາບແນວໃດ ມັງສະຈັກຂຸກໍມີສະພາບແນວນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ມັງສະຈັກຂຸທີ່ທຳອຸບປະຖຳແລ້ວເປັນທິບພະຈັກຂຸໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ມັງສະຈັກຂຸກັບທິບພະຈັກຂຸເປັນອັນດຽວກັນ ທິບພະຈັກຂຸກັບມັງສະຈັກຂຸກໍເປັນອັນດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ມັງສະຈັກຂຸທີ່ທຳອຸບປະຖຳແລ້ວເປັນທິບພະຈັກຂຸໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຂອບເຂດ ອານຸພາບ ໂຄຈອນຂອງມັງສະຈັກຂຸມີສະພາບແນວໃດ ຂອບເຂດ ອານຸພາບ ໂຄຈອນ ຂອງທິບພະຈັກຂຸກໍມີສະພາບແນວນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ມັງສະຈັກຂຸທີ່ທຳອຸບປະຖຳແລ້ວເປັນທິບພະຈັກຂຸໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ມັງສະຈັກຂຸເປັນສະພາວະທຳທີ່ກຳອັນປະກອບດ້ວຍຕັນຫາທິດຖິຍຶດຖືແລ້ວເປັນສະພາວະທຳທີ່ກຳອັນປະກອບດ້ວຍຕັນຫາທິດຖິບໍ່ຍຶດຖືໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

ສກ. ມັງສະຈັກຂຸເປັນສະພາວະທຳທີ່ກຳອັນປະກອບດ້ວຍຕັນຫາທິດຖິຍຶດຖືແລ້ວເປັນສະພາວະທຳທີ່ກຳອັນປະກອບດ້ວຍຕັນຫາທິດຖິບໍ່ຍຶດຖືໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ມັງສະຈັກຂຸເປັນກາມາວະຈອນແລ້ວເປັນຮູບປາວະຈອນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

ສກ. ມັງສະຈັກຂຸເປັນກາມາວະຈອນແລ້ວເປັນຮູບປາວະຈອນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ມັງສະຈັກຂຸເປັນຮູບປາວະຈອນແລ້ວເປັນອະຮູບປາວະຈອນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

ສກ. ມັງສະຈັກຂຸເປັນຮູບປາວະຈອນແລ້ວເປັນອະຮູບປາວະຈອນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ມັງສະຈັກຂຸເປັນສະພາວະທຳທີ່ນັບເນື່ອງໃນວັດຕະທຸກແລ້ວເປັນສະພາວະທຳທີ່ບໍ່ນັບເນື່ອງໃນວັດຕະທຸກໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

[໓໗໔] ສກ. ມັງສະຈັກຂຸທີ່ທຳອຸບປະຖຳແລ້ວເປັນທິບພະຈັກຂຸໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທິບພະຈັກຂຸທີ່ທຳອຸບປະຖຳແລ້ວເປັນມັງສະຈັກຂຸໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

ສກ. ມັງສະຈັກຂຸທີ່ທຳອຸບປະຖຳແລ້ວເປັນທິບພະຈັກຂຸໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທິບພະຈັກຂຸທີ່ທຳອຸບປະຖຳແລ້ວເປັນປັນຍາຈັກຂຸ (ຕາປັນຍາ) ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

ສກ. ມັງສະຈັກຂຸທີ່ທຳອຸບປະຖຳແລ້ວເປັນທິບພະຈັກຂຸໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທິບພະຈັກຂຸທີ່ທຳອຸບປະຖຳແລ້ວເປັນປັນຍາຈັກຂຸໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

ສກ. ມັງສະຈັກຂຸທີ່ທຳອຸບປະຖຳແລ້ວເປັນທິບພະຈັກຂຸໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂຸມີ ໔ ຢ່າງເທົ່ານັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈັກຂຸມີ ໔ ຢ່າງເທົ່ານັ້ນແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂຸ ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມີ ໓ ຢ່າງ ຄື ມັງສະຈັກຂຸ ທິບພະຈັກຂຸ ແລະປັນຍາຈັກຂຸ" ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຈັກຂຸ ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມີ ໓ ຢ່າງ ຄື (໑) ມັງສະຈັກຂຸ (໔) ທິບພະຈັກຂຸ (໓) ປັນຍາຈັກຂຸ" ທ່ານກໍບໍ່ຄວນຍອມຮັບວ່າ "ຈັກຂຸມີ ໔ ຢ່າງເທົ່ານັ້ນ"

ສກ. ຈັກຂຸມີ ໔ ຢ່າງເທົ່ານັ້ນແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ຈັກຂຸນີ້ມີ ໓ ຢ່າງ ໓ ຢ່າງອັນໃດແດ່ ຄື (໑) ມັງສະຈັກຂຸ (໔) ທິບພະຈັກຂຸ (໓) ປັນຍາຈັກຂຸ

ຈັກຂຸມີ ໓ ແນວນີ້ແລ

ພຣະສຳມາສຳພຸດທະເຈົ້າ ຜູ້ອຸດົມບຸຣຸດ
ໄດ້ຕັດຈັກຂຸ ໓ ຢ່າງ ຄື ມັງສະຈັກຂຸ ທິບພະຈັກຂຸ
ແລະປັນຍາຈັກຂຸອັນປະເສີດ
ຄວາມເກີດຂຶ້ນແຫ່ງມັງສະຈັກຂຸເປັນທາງແຫ່ງທິບພະຈັກຂຸ
ເມື່ອໃດ ຍານຄືປັນຍາຈັກຂຸອັນປະເສີດເກີດຂຶ້ນ
ເມື່ອນັ້ນ ຍ່ອມລຸດພົ້ນຈາກທຸກທັງປວງໄດ້
ຍ້ອນໄດ້ປັນຍາຈັກຂຸ"

ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານກໍບໍ່ຄວນຍອມຮັບວ່າ "ຈັກຂຸມີ ໔ ຢ່າງເທົ່ານັ້ນ"

**ທິບພະຈັກຂຸກະຖາ ຈົບ**

## ໗. ທິບພະໂສຕະກະຖາ (໔໗)

## ວ່າດ້ວຍທິບພະໂສຕະ

[໓໗໕] ສກ. ມັງສະໂສຕະທີ່ທຳອຸບປະຖຳແລ້ວເປັນທິບພະໂສຕະໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ມັງສະໂສຕະຄືທິບພະໂສຕະ ທິບພະໂສຕະກໍຄືມັງສະໂສຕະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ມັງສະໂສຕະທີ່ທໍາອຸບປະຖໍາແລ້ວເປັນທິບພະໂສຕະໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ມັງສະໂສຕະມີສະພາບແນວໃດ ທິບພະໂສຕະກໍມີສະພາບແນວນັ້ນ ທິບພະໂສຕະມີສະພາບແນວໃດ ມັງສະໂສຕະກໍມີສະພາບແນວນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ມັງສະໂສຕະທີ່ທໍາອຸບປະຖໍາແລ້ວເປັນທິບພະໂສຕະໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ມັງສະໂສຕະກັບທິບພະໂສຕະເປັນອັນດຽວກັນ ທິບພະໂສຕະກັບມັງສະໂສຕະກໍເປັນອັນດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ມັງສະໂສຕະທີ່ທໍາອຸບປະຖໍາແລ້ວເປັນທິບພະໂສຕະໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຂອບເຂດ ອານຸພາບ ໂຄຈອນຂອງມັງສະໂສຕະມີສະພາບແນວໃດ ຂອບເຂດ ອານຸພາບ ໂຄຈອນຂອງທິບພະໂສຕະກໍມີສະພາບແນວນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ມັງສະໂສຕະທີ່ທໍາອຸບປະຖໍາແລ້ວເປັນທິບພະໂສຕະໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ມັງສະໂສຕະເປັນສະພາວະທໍາທີ່ກໍາອັນປະກອບດ້ວຍຕັນຫາທິດຖິຍຶດຖືແລ້ວເປັນສະພາວະທໍາທີ່ກໍາອັນປະກອບດ້ວຍຕັນຫາທິດຖິບໍ່ຍຶດຖືໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ມັງສະໂສຕະເປັນສະພາວະທໍາທີ່ກໍາອັນປະກອບດ້ວຍຕັນຫາທິດຖິຍຶດຖືແລ້ວເປັນສະພາວະທໍາທີ່ກໍາອັນປະກອບດ້ວຍຕັນຫາທິດຖິບໍ່ຍຶດຖືໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ມັງສະໂສຕະເປັນກາມາວະຈອນແລ້ວເປັນຮູບປາວະຈອນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ມັງສະໂສຕະເປັນກາມາວະຈອນແລ້ວເປັນຮູບປາວະຈອນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ມັງສະໂສຕະເປັນຮູບປາວະຈອນແລ້ວເປັນອະຮູບປາວະຈອນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ມັງສະໂສຕະເປັນຮູບປາວະຈອນແລ້ວເປັນອະຮູບປາວະຈອນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ມັງສະໂສຕະເປັນສະພາວະທຳທີ່ນັບເນື່ອງໃນວັດຕະທຸກແລ້ວເປັນສະພາວະທຳທີ່ບໍ່ນັບເນື່ອງໃນວັດຕະທຸກໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[ສກຜ] ສກ. ມັງສະໂສຕະທີ່ທຳອຸບປະຖຳແລ້ວເປັນທິບພະໂສຕະໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທິບພະໂສຕະທີ່ທຳອຸບປະຖຳແລ້ວເປັນມັງສະໂສຕະໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ມັງສະໂສຕະທີ່ທຳອຸບປະຖຳແລ້ວເປັນທິບພະໂສຕະໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ໂສຕະມີຢ່າງດຽວເທົ່ານັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂສຕະມີຢ່າງດຽວເທົ່ານັ້ນແມ່ນບໍ?

ປຣ. ແມ່ນ

ສກ. ໂສຕະ ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມີ ໒ ຢ່າງຄື ມັງສະໂສຕະແລະທິບພະໂສຕະ" ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກໂສຕະ ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມີ ໒ ຢ່າງ ຄື ມັງສະໂສຕະແລະ ທິບພະໂສຕະ" ທ່ານກໍບໍ່ຄວນຍອມຮັບວ່າ "ໂສຕະມີຢ່າງດຽວເທົ່ານັ້ນ"

**ທິບພະໂສຕະກະຖາ ຈົບ**

## ໗. ຍະຖາກຳມູປະຄະຕະຍານະກະຖາ (໔໗)
## ວ່າດ້ວຍຍະຖາກຳມູປະຄະຕະຍານ

[ສກກ] ສກ. ຍະຖາກຳມູປະຄະຕະຍານ ເປັນທິບພະຈັກຂຸແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນມະນະສິການເຖິງສັດທີ່ເປັນໄປຕາມກຳ ແລະເຫັນຮູບໄດ້ດ້ວຍທິບພະຈັກຂຸແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນມະນະສິການເຖິງສັດທີ່ເປັນໄປຕາມກຳ ແລະເຫັນຮູບໄດ້ດ້ວຍທິບພະຈັກຂຸແມ່ນບໍ?

ປຣ. ແມ່ນ

ສກ. ມີການປະຊຸມແຫ່ງຜັດສະ ໔ ຢ່າງ ຈິດ ໔ ດວງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ຍະຖາກຳມູປະຄະຕະຍານເປັນທິບພະຈັກຂຸແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນມະນະສິການວ່າ "ທ່ານຜູ້ຈະເລີນທັງຫຼາຍ ສັດເຫຼົ່ານີ້ນໍ ມະນະສິການວ່າ "ປະກອບກາຍທຸດຈະຣິດ" ມະນະສິການວ່າ "ປະກອບວະຈີທຸດຈະຣິດ" ມະນະສິການວ່າ "ປະກອບ ມະໂນທຸດຈະຣິດ" ມະນະສິການວ່າ "ເປັນຜູ້ກ່າວຮ້າຍພຣະອະຣິຍະ" ມະນະສິການວ່າ "ມີຄວາມເຫັນຜິດ" ມະນະສິການວ່າ "ຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຜິດ" ແລະມະນະສິການວ່າ "ຫຼັງຈາກຕາຍແລ້ວ ສັດເຫຼົ່ານັ້ນກໍໄປບັງເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ"

ບຸກຄົນມະນະສິການວ່າ "ທ່ານຜູ້ຈະເລີນທັງຫຼາຍ ສັດເຫຼົ່ານີ້ ມະນະສິການວ່າ "ປະກອບກາຍສຸດຈະຣິດ" ມະນະສິການວ່າ "ປະກອບວະຈີສຸດຈະຣິດ" ມະນະສິການວ່າ "ປະກອບມະໂນສຸດຈະຣິດ" ມະນະສິການວ່າ "ບໍ່ກ່າວຮ້າຍພຣະອະຣິຍະ" ມະນະສິການວ່າ "ມີຄວາມເຫັນຖືກ" ມະນະສິການວ່າ "ຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຖືກ" ແລະມະນະສິການວ່າ "ຫຼັງຈາກຕາຍແລ້ວ ສັດເຫຼົ່ານັ້ນກໍໄປເກີດໃນສຸກຄະຕິໂລກສະຫວັນ" ເຫັນຮູບດ້ວຍທິບພະຈັກຂຸແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ບຸກຄົນມະນະສິການວ່າ "ຫຼັງຈາກຕາຍແລ້ວສັດເຫຼົ່ານັ້ນກໍໄປບັງເກີດໃນສຸກຄະຕິໂລກສະຫວັນ" ເຫັນຮູບໄດ້ດ້ວຍທິບພະຈັກຂຸແມ່ນບໍ?

ປຣ. ແມ່ນ

ສກ. ມີການປະຊຸມແຫ່ງຜັດສະ ໔ ຢ່າງ ຈິດ ໔ ດວງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

[ຂໍ້ກຖ] ສກ. ຍະຖາກຳມູປະຄະຕະຍານເປັນທິບພະຈັກຂຸແມ່ນບໍ?

ປຣ. ແມ່ນ

ສກ. ບາງຄົນບໍ່ມີທິບພະຈັກຂຸ ບໍ່ໄດ້ ບໍ່ບັນລຸ ບໍ່ໄດ້ເຮັດໃຫ້ແຈ້ງທິບພະຈັກຂຸ ແຕ່ຮູ້ວ່າ "ສັດຜູ້ເປັນໄປຕາມກຳມີຢູ່" ແມ່ນບໍ?

ປຣ. ແມ່ນ

ສກ. ຫາກບາງຄົນບໍ່ມີທິບພະຈັກຂຸ ບໍ່ໄດ້ ບໍ່ບັນລຸ ບໍ່ເຮັດໃຫ້ແຈ້ງທິບພະຈັກຂຸ ແຕ່ຮູ້ວ່າ "ສັດຜູ້ເປັນໄປຕາມກຳມີຢູ່" ທ່ານກໍບໍ່ຄວນຍອມຮັບວ່າ "ຍະຖາກຳມູປະຄະຕະຍານເປັນທິບພະຈັກຂຸ"

ສກ. ຍະຖາກຳມູປະຄະຕະຍານເປັນທິບພະຈັກຂຸແມ່ນບໍ?

ປຣ. ແມ່ນ

ສກ. ທ່ານພຣະສາຣີບຸດຮູ້ຍະຖາກຳມູປະຄະຕະຍານແມ່ນບໍ່?

ປຣ. ແມ່ນ

ສກ. ຫາກທ່ານພຣະສາຣີບຸດຮູ້ຍະຖາກຳມູປະຄະຕະຍານ ທ່ານກໍບໍ່ຄວນຍອມຮັບວ່າ ຍະຖາກຳມູປະຄະຕະຍານເປັນທິບພະຈັກຂຸ"

ສກ. ຍະຖາກຳມູປະຄະຕະຍານເປັນທິບພະຈັກຂຸແມ່ນບໍ?

ປຣ. ແມ່ນ

ສກ. ທ່ານພຣະສາຣີບຸດຮູ້ຍະຖາກຳມູປະຄະຕະຍານແມ່ນບໍ?

ປຣ. ແມ່ນ

ສກ. ທ່ານພຣະສາຣີບຸດມີທິບພະຈັກຂຸແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ທ່ານພຣະສາຣີບຸດມີທິບພະຈັກຂຸແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ວ່າ "ທ່ານພຣະສາຣີບຸດໄດ້ກ່າວໄວ້ດັ່ງນີ້ວ່າ

ເຮົາບໍ່ໄດ້ຕັ້ງຄວາມປາຖະໜາໄວ້ເພື່ອບຸບເພນິວາສະຍານ
ທິບພະຈັກຂຸຍານ ເຈໂຕປະຣິຍະຍານ ອິດທິວິທະຍານ
ທິບພະໂສຕະຍານ ແລະຈຸຕູປະປາຕະຍານ"

ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ຍະຖາກຳມູປະຄະຕະຍານເປັນທິບພະຈັກຂຸ"

**ຍະຖາກຳມູປະຄະຕະຍານະກະຖາ ຈົບ**

## ໑໐. ສັງວະຣະກະຖາ (໖໐)

## ວ່າດ້ວຍຄວາມສັງລວມ

[໖໗໙] ສກ. ຄວາມສັງລວມມີຢູ່ໃນໝູ່ເທວະດາ ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມບໍ່ສັງລວມມີຢູ່ໃນໝູ່ເທວະດາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມບໍ່ສັງລວມບໍ່ມີໃນໝູ່ເທວະດາແມ່ນບໍ?

ປຣ. ແມ່ນ

ສກ. ຄວາມສັງລວມບໍ່ມີໃນໝູ່ເທວະດາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມສັງລວມຈາກຄວາມບໍ່ສັງລວມເປັນສິນ ຄວາມສັງລວມມີຢູ່ໃນໝູ່ເທວະດາ ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມສັງລວມຈາກຄວາມບໍ່ສັງລວມໃດເປັນສິນ ຄວາມບໍ່ສັງລວມນັ້ນມີຢູ່ໃນໝູ່ເທວະດາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ

ສກ. ທ່ານຈຶ່ງຮັບນິກຄະຫະ ດັ່ງຕໍ່ໄປນີ້

ຫາກຄວາມສັງລວມຈາກຄວາມບໍ່ສັງລວມເປັນສິນ ແລະຄວາມສັງລວມມີຢູ່ໃນໝູ່ເທວະດາ ດັ່ງນັ້ນ ທ່ານຈຶ່ງຄວນຍອໄມຮັບວ່າ "ຄວາມສັງລວມຈາກຄວາມບໍ່ສັງລວມໃດເປັນສິນ ຄວາມບໍ່ສັງລວມນັ້ນມີຢູ່ໃນໝູ່ເທວະດາ" ທ່ານກ່າວຄຳຂັດແຍ່ງໃດໃນຕອນຕົ້ນນັ້ນວ່າ "ຂ້າພະເຈົ້າຍອມຮັບວ່າ ຄວາມສັງລວມຈາກຄວາມບໍ່ສັງລວມເປັນສິນ ຄວາມສັງລວມມີຢູ່ໃນໝູ່ເທວະດາ ແຕ່ບໍ່ຍອມຮັບວ່າ ຄວາມສັງລວມຈາກຄວາມບໍ່ສັງລວມໃດເປັນສິນ ຄວາມບໍ່ສັງລວມນັ້ນມີຢູ່ໃນໝູ່ເທວະດາ" ຄຳນັ້ນຂອງທ່ານຈຶ່ງຜິດ

ອັນໜຶ່ງ ຫາກທ່ານບໍ່ຍອມຮັບວ່າ "ຄວາມສັງລວມຈາກຄວາມບໍ່ສັງລວມໃດເປັນສິນ ຄວາມບໍ່ສັງລວມນັ້ນມີຢູ່ໃນໝູ່ເທວະດາ" ທ່ານກໍບໍ່ຄວນຍອມຮັບວ່າ "ຄວາມສັງລວມຈາກຄວາມບໍ່ສັງລວມເປັນສິນ ຄວາມສັງລວມມີຢູ່ໃນໝູ່ເທວະດາ" ທ່ານກ່າວຄຳຂັດແຍ່ງໃດໃນຕອນຕົ້ນນັ້ນວ່າ "ຂ້າພະເຈົ້າຍອມຮັບວ່າ ຄວາມສັງລວມຈາກຄວາມບໍ່ສັງລວມເປັນສິນ ຄວາມສັງລວມມີຢູ່ໃນໝູ່ເທວະດາ ແຕ່ບໍ່ຍອມຮັບວ່າ ຄວາມສັງລວມຈາກຄວາມບໍ່ສັງລວມໃດເປັນສິນ ຄວາມບໍ່ສັງລວມນັ້ນມີຢູ່ໃນໝູ່ເທວະດາ" ຄຳນັ້ນຂອງທ່ານຈຶ່ງຜິດ

ສກ. ຄວາມສັງລວມມີຢູ່ໃນໝູ່ມະນຸດ ຄວາມບໍ່ສັງລວມກໍມີຢູ່ໃນໝູ່ມະນຸດນັ້ນ ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມສັງລວມມີຢູ່ໃນໝູ່ເທວະດາ ຄວາມບໍ່ສັງລວມກໍມີຢູ່ໃນໝູ່ເທວະດານັ້ນ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມສັງລວມມີຢູ່ໃນໝູ່ເທວະດາ ແຕ່ຄວາມບໍ່ສັງລວມບໍ່ມີໃນໝູ່ເທວະດານັ້ນແມ່ນບໍ?

ປຣ. ແມ່ນ

ສກ. ຄວາມສັງລວມມີຢູ່ໃນໝູ່ມະນຸດ ແຕ່ຄວາມບໍ່ສັງລວມບໍ່ມີໃນໝູ່ມະນຸດນັ້ນ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໓໗໐] ສກ. ການງົດເວັ້ນຈາກການຂ້າສັດມີຢູ່ໃນໝູ່ເທວະດາແມ່ນບໍ?

ປຣ. ແມ່ນ

ສກ. ການຂ້າສັດມີຢູ່ໃນໝູ່ເທວະດາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການງົດເວັ້ນຈາກການເສບຂອງມຶນເມົາຄືສຸຣາ ແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດມີຢູ່ໃນໝູ່ເທວະດາແມ່ນບໍ?

ປຣ. ແມ່ນ

ສກ. ການເສບຂອງມຶນເມົາ ຄື ສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດມີຢູ່ໃນໝູ່ເທວະດາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການຂ້າສັດບໍ່ມີໃນໝູ່ເທວະດາແມ່ນບໍ?

ປຣ. ແມ່ນ

ສກ. ການງົດເວັ້ນຈາກການຂ້າສັດບໍ່ມີໃນໝູ່ເທວະດາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການເສບຂອງມຶນເມົາ ຄື ສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດບໍ່ມີໃນໝູ່ເທວະດາແມ່ນບໍ?

ປຣ. ແມ່ນ

ສກ. ການງົດເວັ້ນຈາກການເສບຂອງມຶນເມົາ ຄື ສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດບໍ່ມີໃນໝູ່ເທວະດາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການງົດເວັ້ນຈາກການຂ້າສັດມີຢູ່ໃນໝູ່ມະນຸດ ການຂ້າສັດກໍມີຢູ່ໃນໝູ່ມະນຸດແມ່ນບໍ?

ປຣ. ແມ່ນ

ສກ. ການງົດເວັ້ນຈາກການຂ້າສັດມີຢູ່ໃນໝູ່ເທວະດາ ການຂ້າສັດກໍມີຢູ່ໃນໝູ່ເທວະດານັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການງົດເວັ້ນຈາກການເສບຂອງມຶນເມົາ ຄື ສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດມີຢູ່ໃນໝູ່ມະນຸດ (ແລະ) ການເສບຂອງມຶນເມົາ ຄື ສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດກໍມີຢູ່ໃນໝູ່ມະນຸດນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ການງົດເວັ້ນຈາກການເສບຂອງມຶນເມົາ ຄື ສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດມີຢູ່ໃນໝູ່ເທວະດາ (ແລະ) ການເສບຂອງມຶນເມົາ ຄື ສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດກໍມີຢູ່ໃນໝູ່ເທວະດານັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແບວນັ້ນ ຯລຯ

ສກ. ການງົດເວັ້ນຈາກການຂ້າສັດມີຢູ່ໃນໝູ່ເທວະດາ ແຕ່ການຂ້າສັດບໍ່ມີໃນໝູ່ເທວະດານັ້ນແມ່ນບໍ?

ປຣ. ແມ່ນ

ສກ. ການງົດເວັ້ນຈາກການຂ້າສັດມີຢູ່ໃນໝູ່ມະນຸດ ແຕ່ການຂ້າສັດບໍ່ມີໃນໝູ່ມະນຸດນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແບວນັ້ນ ຯລຯ

ສກ. ການງົດເວັ້ນຈາກການເສບຂອງມຶນເມົາ ຄື ສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດມີຢູ່ໃນໝູ່ເທວະດາ (ແຕ່) ການເສບຂອງມຶນເມົາ ຄື ສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດບໍ່ມີໃນໝູ່ເທວະດານັ້ນແມ່ນບໍ?

ປຣ. ແມ່ນ

ສກ. ການງົດເວັ້ນຈາກການເສບຂອງມຶນເມົາ ຄື ສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດມີຢູ່ໃນໝູ່ມະນຸດ (ແຕ່) ການເສບຂອງມຶນເມົາ ຄື ສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດບໍ່ມີໃນໝູ່ມະນຸດນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແບວນັ້ນ ຯລຯ

ປຣ. ຄວາມສັງລວມບໍ່ມີໃນໝູ່ເທວະດາແມ່ນບໍ?

ສກ. ແມ່ນ

ປຣ. ເທວະດາທັງປວງເປັນຜູ້ຂ້າສັດ ຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ ປະພຶດຜິດໃນການເວົ້າຕົວະ ເສບຂອງມຶນເມົາ ຄື ສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ແມ່ນບໍ?

ສກ. ບໍ່ຄວນກ່າວແບວນັ້ນ ຯລຯ

ປຣ. ດັ່ງນັ້ນ ຄວາມສັງລວມຈຶ່ງມີຢູ່ໃນໝູ່ເທວະດາ

**ສັງວະຣະກະຖາ ຈົບ**

# ໑໑. ອະສັນຍະກະຖາ (໓໑)

## ວ່າດ້ວຍອະສັນຍະສັດ

[໓໗໑] ສກ. ສັນຍາມີຢູ່ໃນໝູ່ອະສັນຍະສັດແມ່ນບໍ?

ປຣ. ແມ່ນ

ສກ. ພົບແຫ່ງອະສັນຍະສັດ ເປັນພົບທີ່ມີສັນຍາ ເປັນຄະຕິທີ່ມີສັນຍາ ເປັນສັດຕາວາສະທີ່ມີສັນຍາ ເປັນສິ່ງສານທີ່ມີສັນຍາ ເປັນກໍາເນີດທີ່ມີສັນຍາ ເປັນການໄດ້ອັດຕະພາບທີ່ມີສັນຍາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ພົບແຫ່ງອະສັນຍະສັດ ເປັນພົບທີ່ບໍ່ມີສັນຍາ ເປັນຄະຕິທີ່ບໍ່ມີສັນຍາ ເປັນສັດຕາວາດທີ່ບໍ່ມີສັນຍາ ເປັນສິ່ງສານທີ່ບໍ່ມີສັນຍາ ເປັນກໍາເນີດທີ່ບໍ່ມີສັນຍາ ເປັນການໄດ້ອັດຕະພາບທີ່ບໍ່ມີສັນຍາບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພົບແຫ່ງອະສັນຍະສັດ ເປັນພົບທີ່ບໍ່ມີສັນຍາ ເປັນຄະຕິທີ່ບໍ່ມີສັນຍາ ເປັນສັດຕາວາດທີ່ບໍ່ມີສັນຍາ ເປັນສິ່ງສານທີ່ບໍ່ມີສັນຍາ ເປັນກໍາເນີດທີ່ບໍ່ມີສັນຍາ ເປັນການໄດ້ອັດຕະພາບທີ່ບໍ່ມີສັນຍາ ທ່ານກໍບໍ່ຄວນຍອມຮັບວ່າ "ສັນຍາມີຢູ່ໃນໝູ່ ອະສັນຍະສັດ"

ສກ. ສັນຍາມີຢູ່ໃນໝູ່ອະສັນຍະສັດແມ່ນບໍ?

ປຣ. ແມ່ນ

ສກ. ພົບແຫ່ງອະສັນຍະສັດ ເປັນພົບທີ່ມີຂັນ ໕ ເປັນຄະຕິ ฯລฯ ເປັນສັດຕາວາດ ฯລฯ ເປັນສິ່ງສານ ฯລฯ ເປັນກໍາເນີດ ฯລฯ ເປັນການໄດ້ອັດຕະພາບທີ່ມີຂັນ ໕ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ພົບແຫ່ງອະສັນຍະສັດ ເປັນພົບທີ່ມີຂັນ ໕ ເປັນຄະຕິ ฯລฯ ເປັນສັດຕາວາດ ฯລฯ ເປັນສິ່ງສານ ฯລฯ ເປັນກໍາເນີດ ฯລฯ ເປັນການໄດ້ອັດຕະພາບທີ່ມີຂັນ ໑໔ ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພົບແຫ່ງອະສັນຍະສັດ ເປັນພົບທີ່ມີຂັນ ໑ ເປັນຄະຕິ ฯລฯ ເປັນສັດຕາວາດ ฯລฯ ເປັນສິ່ງສານ ฯລฯ ເປັນກໍາເນີດ ฯລฯ ເປັນການໄດ້ອັດຕະພາບທີ່ມີຂັນ ໑ ທ່ານກໍບໍ່ຄວນຍອມຮັບວ່າ "ສັນຍາມີຢູ່ໃນໝູ່ອະສັນຍະສັດ"

ສກ. ສັນຍາມີຢູ່ໃນໝູ່ອະສັນຍະສັດແມ່ນບໍ?

ປຣ. ແມ່ນ

ສກ. ອະສັນຍະສັດເຮັດກິດທີ່ຄວນເຮັດດ້ວຍສັນຍາໄດ້ດ້ວຍສັນຍານັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໓໗໔] ສກ. ສັນຍາມີຢູ່ໃນໝູ່ມະນຸດ ແລະໂລກຂອງມະນຸດນັ້ນກໍເປັນພົບທີ່ມີສັນຍາ ເປັນຄະຕິທີ່ມີສັນຍາ ເປັນສັດຕາວາດທີ່ມີສັນຍາ ເປັນສິ່ງສານທີ່ມີສັນຍາ ເປັນກໍາເນີດທີ່ມີສັນຍາ ເປັນການໄດ້ອັດຕະພາບທີ່ມີສັນຍາແມ່ນບໍ?

ປຣ. ແມ່ນ

ສກ. ສັນຍາມີຢູ່ໃນໝູ່ອະສັນຍະສັດ ແລະພົບແຫ່ງອະສັນຍະສັດນັ້ນກໍເປັນພົບທີ່ມີສັນຍາ ເປັນຄະຕິທີ່ມີສັນຍາ ເປັນສັດຕາວາດທີ່ມີສັນຍາ ເປັນສົງສານທີ່ມີສັນຍາ ເປັນກຳເນີດທີ່ມີສັນຍາ ເປັນການໄດ້ອັດຕະພາບທີ່ມີສັນຍາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສັນຍາມີຢູ່ໃນໝູ່ມະນຸດ ແລະໂລກຂອງມະນຸດນັ້ນກໍເປັນພົບທີ່ມີຂັນ ໕ ເປັນຄະຕິ ຯລຯ ເປັນສັດຕາວາດ ຯລຯ ເປັນສົງສານ ຯລຯ ເປັນກຳເນີດ ຯລຯ ເປັນການໄດ້ອັດຕະພາບທີ່ມີຂັນ ໕ ແມ່ນບໍ?

ປຣ. ແມ່ນ

ສກ. ສັນຍາມີຢູ່ໃນໝູ່ອະສັນຍະສັດ ແລະພົບແຫ່ງອະສັນຍະສັດນັ້ນເປັນພົບທີ່ມີ ຂັນ ໕ ເປັນຄະຕິ ຯລຯ ເປັນສັດຕາວາດ ຯລຯ ເປັນສົງສານ ຯລຯ ເປັນກຳເນີດ ຯລຯ ເປັນການ ໄດ້ອັດຕະພາບທີ່ມີຂັນ ໕ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສັນຍາມີຢູ່ໃນໝູ່ມະນຸດ ມະນຸດເຮັດກິດທີ່ຄວນເຮັດດ້ວຍສັນຍາໄດ້ ດ້ວຍສັນຍານັ້ນແມ່ນບໍ?

ປຣ. ແມ່ນ

ສກ. ສັນຍາມີຢູ່ໃນໝູ່ອະສັນຍະສັດ ອະສັນຍະສັດເຮັດກິດທີ່ຄວນເຮັດດ້ວຍສັນຍາໄດ້ ດ້ວຍສັນຍານັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສັນຍາມີຢູ່ໃນໝູ່ອະສັນຍະສັດ ແລະພົບແຫ່ງອະສັນຍະສັດນັ້ນກໍເປັນພົບທີ່ບໍ່ມີສັນຍາ ເປັນຄະຕິທີ່ບໍ່ມີສັນຍາ ເປັນສັດຕາວາດທີ່ບໍ່ມີສັນຍາ ເປັນສົງສານທີ່ບໍ່ມີສັນຍາ ເປັນກຳເນີດທີ່ບໍ່ມີສັນຍາ ເປັນການໄດ້ອັດຕະພາບທີ່ບໍ່ມີສັນຍາແມ່ນບໍ?

ປຣ. ແມ່ນ

ສກ. ສັນຍາມີຢູ່ໃນໝູ່ມະນຸດ ແລະໂລກຂອງມະນຸດນັ້ນກໍເປັນພົບທີ່ບໍ່ມີສັນຍາ ຯລຯ ເປັນການໄດ້ອັດຕະພາບທີ່ບໍ່ມີສັນຍາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສັນຍາມີຢູ່ໃນໝູ່ອະສັນຍະສັດ ແລະພົບແຫ່ງອະສັນຍະສັດນັ້ນກໍເປັນພົບທີ່ມີຂັນ ໑ ເປັນຄະຕິ ຯລຯ ເປັນສັດຕາວາດ ຯລຯ ເປັນສົງສານ ຯລຯ ເປັນກຳເນີດ ຯລຯ ເປັນການໄດ້ອັດຕະພາບທີ່ມີຂັນ ໑ ແມ່ນບໍ?

ປຣ. ແມ່ນ

ສກ. ສັນຍາມີຢູ່ໃນໝູ່ມະນຸດ ແລະໂລກຂອງມະນຸດນັ້ນກໍເປັນພົບທີ່ມີຂັນ ໑ ຯລຯ ເປັນການໄດ້ອັດຕະພາບທີ່ມີຂັນ ໑ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສັນຍາມີຢູ່ໃນໝູ່ອະສັນຍະສັດ ແຕ່ອະສັນຍະສັດບໍ່ເຮັດກິດທີ່ຄວນເຮັດດ້ວຍສັນຍາໄດ້ ດ້ວຍສັນຍານັ້ນແມ່ນບໍ?

ປຣ. ແມ່ນ

ສກ. ສັນຍາມີຢູ່ໃນໝູ່ມະນຸດ ແຕ່ມະນຸດບໍ່ເຮັດກິດທີ່ຄວນເຮັດດ້ວຍສັນຍາໄດ້ ດ້ວຍສັນຍານັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໓໗໓] ປຣ. ທ່ານບໍ່ຍອມຮັບວ່າ "ສັນຍາມີຢູ່ໃນໝູ່ອະສັນຍະສັດ" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ມີເທບຊື່ອະສັນຍະສັດຈຸຕິ (ເຄື່ອນ) ຈາກຊັ້ນນັ້ນ ຍ້ອນເກີດສັນຍາຂຶ້ນ" ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ສັນຍາຈຶ່ງມີຢູ່ໃນໝູ່ອະສັນຍະສັດ

ສກ. ສັນຍາມີຢູ່ໃນໝູ່ອະສັນຍະສັດແມ່ນບໍ?

ປຣ. ບາງເວລາມີ ບາງເວລາບໍ່ມີ

ສກ. ອະສັນຍະສັດບາງເວລາເປັນສັນຍະສັດ ບາງເວລາເປັນອະສັນຍະສັດ ພົບແຫ່ງອະສັນຍະສັດບາງເວລາເປັນພົບທີ່ມີສັນຍາ ບາງເວລາເປັນພົບທີ່ບໍ່ມີສັນຍາ ບາງເວລາເປັນພົບທີ່ມີຂັນ ໕ ບາງເວລາເປັນພົບທີ່ມີຂັນ ໑ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບາງເວລາສັນຍາມີໃນໝູ່ອະສັນຍະສັດ ບາງເວລາບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ເວລາໃດມີ ເວລາໃດບໍ່ມີ?

ປຣ. ໃນຈຸຕິການ ໃນປະຕິສົນທິການມີ ແຕ່ໃນຖິຕິການ (ປະວັດຕິການ) ບໍ່ມີ

ສກ. ອະສັນຍະສັດ ໃນຈຸຕິການ ໃນປະຕິສົນທິການ ເປັນສັນຍະສັດ ໃນຖິຕິການເປັນອະສັນຍະສັດ ໃນຈຸຕິການ ໃນປະຕິສົນທິການ ເປັນພົບທີ່ມີສັນຍາ ໃນຖິຕິການ ເປັນພົບທີ່ບໍ່ມີສັນຍາ ໃນຈຸຕິການ ໃນປະຕິສົນທິການ ເປັນພົບທີ່ມີຂັນ ໕ ໃນຖິຕິການ ເປັນພົບທີ່ມີຂັນ ໑ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

**ອະສັນຍະກະຖາ ຈົບ**

# ໑໔. ເນວະສັນຍານາສັນຍາຍະຕະນະກະຖາ (໑໔)
## ວ່າດ້ວຍເນວະສັນຍານາສັນຍາຍະຕະນະ

[໑໗໔] ສກ. ໃນເນວະສັນຍານາສັນຍາຍະຕະນະພົບ ທ່ານບໍ່ຍອມຮັບວ່າ "ສັນຍາມີຢູ່" ແມ່ນບໍ?

ປຣ. ແມ່ນ

ສກ. ເນວະສັນຍານາສັນຍາຍະຕະນະພົບ ເປັນພົບທີ່ບໍ່ມີສັນຍາ ເປັນຄະຕິທີ່ບໍ່ມີສັນຍາ ເປັນສັດຕາວາດທີ່ບໍ່ມີສັນຍາ ເປັນສົງສານທີ່ບໍ່ມີສັນຍາ ເປັນກຳເນີດທີ່ບໍ່ມີສັນຍາ ເປັນການໄດ້ອັດຕະພາບທີ່ບໍ່ມີສັນຍາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເນວະສັນຍານາສັນຍາຍະຕະນະພົບ ເປັນພົບທີ່ບໍ່ມີສັນຍາ ເປັນຄະຕິທີ່ບໍ່ມີສັນຍາ ເປັນສັດຕາວາດທີ່ບໍ່ມີສັນຍາ ເປັນສົງສານທີ່ບໍ່ມີສັນຍາ ເປັນກຳເນີດທີ່ບໍ່ມີສັນຍາ ເປັນການໄດ້ອັດຕະພາບທີ່ບໍ່ມີສັນຍາບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກເປັນພົບທີ່ມີສັນຍາ ເປັນຄະຕິທີ່ມີສັນຍາ ຯລຯ ເປັນການໄດ້ອັດຕະພາບທີ່ມີສັນຍາ ທ່ານກໍບໍ່ຄວນຍອມຮັບວ່າ "ໃນເນວະສັນຍານາສັນຍາຍະຕະນະພົບ ຂ້າພະເຈົ້າບໍ່ຍອມຮັບວ່າ "ສັນຍາມີຢູ່"

ສກ. ໃນເນວະສັນຍານາສັນຍາຍະຕະນະພົບ ທ່ານບໍ່ຍອມຮັບວ່າ "ສັນຍາມີຢູ່" ແມ່ນບໍ?

ປຣ. ແມ່ນ

ສກ. ເນວະສັນຍານາສັນຍາຍະຕະນະພົບເປັນພົບທີ່ມີຂັນ ໑ ເປັນຄະຕິ ຯລຯ ເປັນການໄດ້ອັດຕະພາບທີ່ມີຂັນ ໑ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພົບນັ້ນເປັນພົບ ຯລຯ ເປັນຄະຕິ ຯລຯ ເປັນການໄດ້ອັດຕະພາບທີ່ມີຂັນ ໔ ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກເປັນພົບ ຯລຯ ເປັນຄະຕິ ຯລຯ ເປັນການໄດ້ອັດຕະພາບທີ່ມີຂັນ ໔ ທ່ານກໍບໍ່ຄວນຍອມຮັບວ່າ "ໃນເນວະສັນຍານາສັນຍາຍະຕະນະພົບ ຂ້າພະເຈົ້າບໍ່ຍອມຮັບວ່າ ສັນຍາມີຢູ່"

[໑໗໕] ສກ. ໃນໝູ່ອະສັນຍະສັດ ທ່ານບໍ່ຍອມຮັບວ່າ "ສັນຍາມີຢູ່" ແລະພົບແຫ່ງອະສັນຍະສັດນັ້ນ ເປັນພົບທີ່ບໍ່ມີສັນຍາ ເປັນຄະຕິທີ່ບໍ່ມີສັນຍາ ເປັນສັດຕາວາດທີ່ບໍ່ມີສັນຍາ ເປັນສົງສານທີ່ບໍ່ມີສັນຍາ ເປັນກຳເນີດທີ່ບໍ່ມີສັນຍາ ເປັນການໄດ້ອັດຕະພາບທີ່ບໍ່ມີສັນຍາແມ່ນບໍ?

ປຣ. ແມ່ນ

ສກ. ໃນເນວະສັນຍານາສັນຍາຍະຕະນະພົບ ທ່ານບໍ່ຍອມຮັບວ່າ "ສັນຍາມີຢູ່" ແລະເນວະສັນຍານາສັນຍາຍະຕະນະພົບນັ້ນເປັນພົບທີ່ບໍ່ມີສັນຍາ ເປັນຄະຕິທີ່ບໍ່ມີສັນຍາ ເປັນສັດຕາວາດທີ່ບໍ່ມີສັນຍາ ເປັນສົງສານທີ່ບໍ່ມີສັນຍາ ເປັນກຳເນີດທີ່ບໍ່ມີສັນຍາ ເປັນການໄດ້ອັດຕະພາບທີ່ບໍ່ມີສັນຍາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນໝູ່ອະສັນຍະສັດ ທ່ານບໍ່ຍອມຮັບວ່າ "ສັນຍາມີຢູ່" ແລະພົບແຫ່ງອະສັນຍະສັດນັ້ນກໍເປັນພົບທີ່ມີຂັນ ໑ ເປັນຄະຕິ ຯລຯ ເປັນການໄດ້ອັດຕະພາບທີ່ມີຂັນ ໑ ແມ່ນບໍ?

ປຣ. ແມ່ນ

ສກ. ໃນເນວະສັນຍານາສັນຍາຍະຕະນະພົບ ທ່ານບໍ່ຍອມຮັບວ່າ "ສັນຍາມີຢູ່" ແລະໃນເນວະສັນຍານາສັນຍາຍະຕະນະພົບກໍເປັນພົບທີ່ມີຂັນ ໑ ເປັນຄະຕິ ຯລຯ ເປັນສັດຕາວາດ ຯລຯ ເປັນສົງສານ ຯລຯ ເປັນກຳເນີດ ຯລຯ ເປັນການໄດ້ອັດຕະພາບທີ່ມີຂັນ ໑ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນເນວະສັນຍານາສັນຍາຍະຕະນະພົບ ທ່ານບໍ່ຍອມຮັບວ່າ "ສັນຍາມີຢູ່" ແລະພົບແຫ່ງອະສັນຍະສັດນັ້ນກໍເປັນພົບທີ່ມີສັນຍາ ເປັນຄະຕິທີ່ມີສັນຍາ ຯລຯ ເປັນການໄດ້ອັດຕະພາບທີ່ມີສັນຍາແມ່ນບໍ?

ປຣ. ແມ່ນ

ສກ. ໃນໝູ່ອະສັນຍະສັດ ທ່ານບໍ່ຍອມຮັບວ່າ "ສັນຍາມີຢູ່" ແລະພົບແຫ່ງອະສັນຍະສັດນັ້ນກໍເປັນພົບທີ່ມີສັນຍາ ເປັນຄະຕິທີ່ມີສັນຍາ ຯລຯ ເປັນການໄດ້ອັດຕະພາບທີ່ມີສັນຍາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນເນວະສັນຍານາສັນຍາຍະຕະນະພົບ ທ່ານບໍ່ຍອມຮັບວ່າ "ສັນຍາມີຢູ່" ແລະໃນເນວະສັນຍານາສັນຍາຍະຕະນະພົບນັ້ນກໍເປັນພົບ ຯລຯ ເປັນຄະຕິ ຯລຯ ເປັນການໄດ້ອັດຕະພາບທີ່ມີຂັນ ໔ ແມ່ນບໍ?

ປຣ. ແມ່ນ

ສກ. ໃນໝູ່ອະສັນຍະສັດ ທ່ານບໍ່ຍອມຮັບວ່າ "ສັນຍາມີຢູ່" ແລະພົບແຫ່ງອະສັນຍະສັດນັ້ນກໍເປັນພົບ ຯລຯ ເປັນການໄດ້ອັດຕະພາບທີ່ມີຂັນ ໔ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນເນວະສັນຍານາສັນຍາຍະຕະນະພົບ ທ່ານບໍ່ຍອມຮັບວ່າ "ສັນຍາມີຢູ່" ແມ່ນບໍ?

ປຣ. ແມ່ນ

ສກ. ເນວະສັນຍານາສັນຍາຍະຕະນະພົບ ເປັນພົບທີ່ມີຂັນ ໔ ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກເນວະສັນຍານາສັນຍາຍະຕະນະພົບ ເປັນພົບທີ່ມີຂັນ ໔ ທ່ານກໍບໍ່ຄວນຍອມ

ຮັບວ່າ "ໃນເນວະສັນຍານາສັນຍາຍະຕະນະພົບ ຂ້າພະເຈົ້າບໍ່ຍອມຮັບວ່າສັນຍາມີຢູ່"

[໓໘໓] ສກ. ເນວະສັນຍານາສັນຍາຍະຕະນະພົບເປັນພົບທີ່ມີຂັນ ໔ ທ່ານບໍ່ຍອມຮັບວ່າ "ໃນເນວະສັນຍານາສັນຍາຍະຕະນະພົບ ສັນຍາມີຢູ່" ແມ່ນບໍ?

ປຣ. ແມ່ນ

ສກ. ອາກາສານັນຈາຍະຕະນະພົບເປັນພົບທີ່ມີຂັນ ໔ ທ່ານບໍ່ຍອມຮັບວ່າ "ໃນອາກາສານັນຈາຍະຕະນະພົບ ສັນຍາມີຢູ່" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເນວະສັນຍານາສັນຍາຍະຕະນະພົບເປັນພົບທີ່ມີຂັນ ໔ ທ່ານບໍ່ຍອມຮັບວ່າ "ໃນເນວະສັນຍານາສັນຍາຍະຕະນະພົບ ສັນຍາມີຢູ່" ແມ່ນບໍ?

ປຣ. ແມ່ນ

ສກ. ວິນຍານັນຈາຍະຕະນະພົບ ຯລຯ ອາກິນຈັນຍາຍະຕະນະພົບ ເປັນພົບທີ່ມີຂັນ ໔ ແຕ່ທ່ານບໍ່ຍອມຮັບວ່າ "ໃນອາກິນຈັນຍາຍະຕະນະພົບສັນຍາມີຢູ່" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອາກາສານັນຈາຍະຕະນະພົບເປັນພົບທີ່ມີຂັນ ໔ ໃນພົບນັ້ນສັນຍາມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ເນວະສັນຍານາສັນຍາຍະຕະນະພົບເປັນພົບທີ່ມີຂັນ ໔ ໃນພົບນັ້ນສັນຍາມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວິນຍານັນຈາຍະຕະນະພົບ ຯລຯ ອາກິນຈັນຍາຍະຕະນະພົບເປັນພົບທີ່ມີຂັນ ໔ ໃນພົບນັ້ນສັນຍາມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ເນວະສັນຍານາສັນຍາຍະຕະນະພົບເປັນພົບທີ່ມີຂັນ ໔ ໃນພົບນັ້ນສັນຍາມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນເນວະສັນຍານາສັນຍາຍະຕະນະພົບ ທ່ານບໍ່ຍອມຮັບວ່າ "ມີສັນຍາກໍແມ່ນ ບໍ່ມີສັນຍາກໍແມ່ນ" ແມ່ນບໍ?

ປຣ. ແມ່ນ

ສກ. ເນວະສັນຍານາສັນຍາຍະຕະນະພົບເປັນພົບທີ່ມີຂັນ ໔ ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກເນວະສັນຍານາສັນຍາຍະຕະນະພົບເປັນພົບທີ່ມີຂັນ ໔ ທ່ານບໍ່ຄວນຍອມຮັບວ່າ "ໃນເນວະສັນຍານາສັນຍາຍະຕະນະພົບ ຂ້າພະເຈົ້າບໍ່ຍອມຮັບວ່າມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ"

ສກ. ເນວະສັນຍານາສັນຍາຍະຕະນະພົບເປັນພົບທີ່ມີຂັນ ໔ ທ່ານບໍ່ຍອມຮັບວ່າ "ໃນເນ

ວະສັນຍານາສັນຍາຍະຕະນະພົບ ສັນຍາມີແລະບໍ່ມີ" ແມ່ນບໍ?

ປຣ. ແມ່ນ

ສກ. ອາກາສານັນຈາຍະຕະນະພົບ ฯລฯ ວິນຍານັນຈາຍະຕະນະພົບ ฯລฯ ອາກິນຈັນຍາຍະຕະນະພົບເປັນພົບທີ່ມີຂັນ ໔ ທ່ານບໍ່ຍອມຮັບວ່າ "ໃນອາກິນຈັນຍາຍະຕະນະພົບ ມີສັນຍາກໍແມ່ນ ບໍ່ມີສັນຍາກໍແມ່ນ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ອາກາສານັນຈາຍະຕະນະພົບເປັນພົບທີ່ມີຂັນ ໔ ໃນພົບນັ້ນສັນຍາມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ເນວະສັນຍານາສັນຍາຍະຕະນະພົບເປັນພົບທີ່ມີຂັນ ໔ ໃນພົບນັ້ນສັນຍາມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ວິນຍານັນຈາຍະຕະນະພົບ ฯລฯ ອາກິນຈັນຍາຍະຕະນະພົບເປັນພົບທີ່ມີຂັນ ໔ ໃນພົບນັ້ນສັນຍາມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ເນວະສັນຍານາສັນຍາຍະຕະນະພົບເປັນພົບທີ່ມີຂັນ ໔ ໃນພົບນັ້ນສັນຍາມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ປຣ. ໃນເນວະສັນຍານາສັນຍາຍະຕະນະພົບ ທ່ານບໍ່ຍອມຮັບວ່າ "ມີສັນຍາກໍແມ່ນ ບໍ່ມີສັນຍາກໍແມ່ນ" ແມ່ນບໍ?

ສກ. ແມ່ນ

ປຣ. ເນວະສັນຍານາສັນຍາຍະຕະນະພົບມີຢູ່ບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກເນວະສັນຍານາສັນຍາຍະຕະນະພົບມີຢູ່ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ໃນເນວະສັນຍານາສັນຍາຍະຕະນະພົບ ຂ້າພະເຈົ້າບໍ່ຍອມຮັບວ່າ ມີສັນຍາກໍແມ່ນ ບໍ່ມີສັນຍາ ກໍແມ່ນ"

ສກ. ຍ້ອນທ່ານເຂົ້າໃຈວ່າ "ເນວະສັນຍານາສັນຍາຍະຕະນະພົບມີຢູ່" ຈຶ່ງບໍ່ຍອມຮັບວ່າ "ມີສັນຍາກໍແມ່ນ ບໍ່ມີສັນຍາກໍແມ່ນ" ແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນທ່ານເຂົ້າໃຈວ່າ "ອະທຸກຂະມະສຸຂະເວທະນາມີຢູ່" ຈຶ່ງບໍ່ຍອມຮັບວ່າ ມີເວທະນາກໍແມ່ນ ບໍ່ມີເວທະນາກໍແມ່ນ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

**ເນວະສັນຍານາສັນຍາຍະຕະນະກະຖາ ຈົບ**

**ຕະຕິຍະວັກ ຈົບ**

## ລວມກະຖາທີ່ມີໃນວັກນີ້ ຄື

໑. ພະລະກະຖາ
໒. ວິມຸດຕິກະຖາ
໕. ອັດຖະມະກະກະຖາ
໗. ທິບພະຈັກຂຸກະຖາ
໙. ຍະຖາກໍາມູປະຄະຕະຍານະກະຖາ
໑໑. ອະສັນຍະກະຖາ
໑໔. ເນວະສັນຍານາສັນຍາຍະຕະນະກະຖາ
໔. ອະຣິຍັນຕິກະຖາ
໔. ວິມຸດຈະມານະກະຖາ
໖. ອັດຖະມະກັດສະອິນທະຣິຍະກະຖາ
໘. ທິບພະໂສຕະກະຖາ
໑໐. ສັງວະຣະກະຖາ

# ໔. ຈະຕຸດຖະວັກ

## ໑. ຄິຫິດສະອະຣະຫາຕິກະຖາ (໓໓)

### ວ່າດ້ວຍຄະລຶຫັດເປັນພຣະອະຣະຫັນ

[໓໘໗] ສກ. ຄະລຶຫັດເປັນພຣະອະຣະຫັນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຄິຫິສັງໂຍດ ຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຄິຫິສັງໂຍດຂອງພຣະອະຣະຫັນບໍ່ມີແມ່ນບໍ່?

ປຣ. ແມ່ນ

ສກ. ຫາກຄິຫິສັງໂຍດຂອງພຣະອະຣະຫັນບໍ່ມີ ທ່ານກໍບໍ່ຄວນຍອມຮັບວ່າ "ຄະລຶຫັດເປັນພຣະອະຣະຫັນໄດ້"

ສກ. ຄະລຶຫັດເປັນພຣະອະຣະຫັນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຄິຫິສັງໂຍດ ພຣະອະຣະຫັນລະໄດ້ແລ້ວ ຕັດຮາກກົ່ນເຫງົ້າ ເໝືອນຕົ້ນຕານ ທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຄິຫິສັງໂຍດ ພຣະອະຣະຫັນລະໄດ້ແລ້ວ ຕັດຮາກກົ່ນເຫງົ້າ ເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ທ່ານກໍບໍ່ຄວນຍອມຮັບວ່າ "ຄະລຶຫັດເປັນພຣະອະຣະຫັນໄດ້"

ສກ. ຄະລືຫັດເປັນພຣະອະຣະຫັນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຄະລືຫັດບາງຄົນລະຄິຫິສັງໂຍດຍັງບໍ່ໄດ້ ແຕ່ເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນມີຢູ່ແມ່ນບໍ?

ປຣ. ບໍ່ມີ

ສກ. ຫາກຄະລືຫັດບາງຄົນລະຄິຫິສັງໂຍດຍັງບໍ່ໄດ້ ແຕ່ເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນບໍ່ມີ ທ່ານກໍບໍ່ຄວນຍອມຮັບວ່າ "ຄະລືຫັດເປັນພຣະອະຣະຫັນໄດ້"

ສກ. ຄະລືຫັດເປັນພຣະອະຣະຫັນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ວ່າ "ວັດສະໂຄດປະຣິພາຊົກໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແຕ່ທ່ານພຣະໂຄດົມ ຄະລືຫັດບາງຄົນຜູ້ຍັງລະຄິຫິສັງໂຍດບໍ່ໄດ້ ຫຼັງຈາກຕາຍແລ້ວ ເຮັດບ່ອນສຸດແຫ່ງທຸກໄດ້ ມີຢູ່ບໍ?" ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ວັດສະຄະລືຫັດຜູ້ຍັງລະຄິຫິສັງໂຍດຍັງບໍ່ໄດ້ ຫຼັງຈາກຕາຍແລ້ວ ຍ່ອມເຮັດບ່ອນສຸດແຫ່ງທຸກໄດ້ບໍ່ມີເລີຍ" ໑ ມີຢູ່ຈິງ ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ຄະລືຫັດເປັນພຣະອະຣະຫັນໄດ້"

ສກ. ຄະລືຫັດເປັນພຣະອະຣະຫັນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນເພິ່ງເສບເມຖຸນທຳ ເພິ່ງໃຫ້ເມຖຸນທຳເກີດຂຶ້ນ ເພິ່ງຢູ່ຄອບຄອງບ່ອນນອນເຊິ່ງຍັດຢຽດດ້ວຍບຸດ ເພິ່ງໃຊ້ຜ້າກາສີກະພັດແລະຂອງຫອມ ເພິ່ງທັດຊົງດອກໄມ້ ຂອງຫອມແລະເຄື່ອງລູບທາ ເພິ່ງຍິນດີຄຳແລະເງິນ ເພິ່ງຮັບແບ້ ແກະ ໄກ່ ໝູ ຊ້າງ ງົວ ມ້າ ລານົກກະທາ ນົກຄຸ່ມ ຫາງນົກຍູງ ເພິ່ງຊົງເຄື່ອງປະດັບມວຍຜົມທີ່ຮັດຫົວສີເຫຼືອງ ຊົງຜ້າຂາວມີຊາຍຍາວ ເປັນຜູ້ຄອງເຮືອນຈົນຕະຫຼອດຊີວິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ທ່ານບໍ່ຍອມຮັບວ່າ "ຄະລືຫັດເປັນພຣະອະຣະຫັນໄດ້" ແມ່ນບໍ?

ສກ. ແມ່ນ

ປຣ. ຍະສະກຸນລະບຸດ ອຸດຕິຍະຄະຫະບໍດີ ເສຕຸມານົບ ບັນລຸອະຣະຫັດຕະຜົນຂະນະມີເພດເປັນຄະລືຫັດບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກຍະສະກຸນລະບຸດ ອຸດຕິຍະຄະຫະບໍດີ ເສຕຸມານົບ ບັນລຸອະຣະຫັດຕະຜົນຂະນະມີເພດຄະລືຫັດ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ຄະລືຫັດເປັນພຣະອະຣະຫັນໄດ້"

**ຄິຫິດສະອະຣະຫາຕິກະຖາ ຈົບ**

# ໔. ອຸປະປັດຕິກະຖາ (໓໔)

## ວ່າດ້ວຍການປະຕິສົນທິ

[໓໗໗] ສກ. ບຸກຄົນເປັນພຣະອະຣະຫັນພ້ອມກັບການປະຕິສົນທິໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ເປັນພຣະໂສດາບັນພ້ອມກັບການປະຕິສົນທິໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເປັນພຣະອະຣະຫັນພ້ອມກັບການປະຕິສົນທິໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ເປັນພຣະສະກະທາຄາມີພ້ອມກັບການປະຕິສົນທິໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເປັນພຣະອະຣະຫັນພ້ອມກັບການປະຕິສົນທິໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ເປັນພຣະອະນາຄາມີພ້ອມກັບການປະຕິສົນທິໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເປັນພຣະໂສດາບັນພ້ອມກັບການປະຕິສົນທິບໍ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຫາກເປັນພຣະໂສດາບັນພ້ອມກັບການປະຕິສົນທິບໍ່ໄດ້ ທ່ານກໍບໍ່ຄວນຍອມຮັບວ່າ "ເປັນພຣະອະຣະຫັນພ້ອມກັບການປະຕິສົນທິໄດ້"

ສກ. ເປັນພຣະສະກະທາຄາມີພ້ອມກັບການປະຕິສົນທິບໍ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຫາກເປັນພຣະສະກະທາຄາມີພ້ອມກັບການປະຕິສົນທິບໍ່ໄດ້ ທ່ານກໍບໍ່ຄວນຍອມຮັບວ່າ "ເປັນພຣະອະຣະຫັນພ້ອມກັບການປະຕິສົນທິໄດ້"

ສກ. ເປັນພຣະອະນາຄາມີພ້ອມກັບການປະຕິສົນທິບໍ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຫາກເປັນພຣະອະນາຄາມີພ້ອມກັບການປະຕິສົນທິບໍ່ໄດ້ ທ່ານກໍບໍ່ຄວນຍອມຮັບວ່າ "ເປັນພຣະອະຣະຫັນພ້ອມກັບການປະຕິສົນທິໄດ້"

[໓໗໙] ສກ. ເປັນພຣະອະຣະຫັນພ້ອມກັບການປະຕິສົນທິໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສາຣີບຸດເຖຣະເປັນພຣະອະຣະຫັນພ້ອມກັບການປະຕິສົນທິແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະມະຫາໂມກຄັນລານະເຖຣະ ຯລຯ ພຣະມະຫາກັດສະປະເຖຣະ ຯລຯ ພຣະມະຫາກັດຈາຍະນະເຖຣະ ຯລຯ ພຣະມະຫາໂກດຖິກະເຖຣະ ຯລຯ ພຣະມະຫາປັນຖະກະເຖຣະ ເປັນພຣະອະຣະຫັນພ້ອມກັບການປະຕິສົນທິແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະສາຣີບຸດເຖຣະບໍ່ໄດ້ເປັນພຣະອະຣະຫັນພ້ອມກັບການປະຕິສົນທິແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະສາຣີບຸດເຖຣະບໍ່ໄດ້ເປັນພຣະອະຣະຫັນພ້ອມກັບການປະຕິສົນທິ ທ່ານກໍບໍ່ຄວນຍອມຮັບວ່າ "ເປັນພຣະອະຣະຫັນພ້ອມກັບການປະຕິສົນທິໄດ້"

ສກ. ພຣະມະຫາໂມກຄັນລານະເຖຣະ ຯລຯ ພຣະມະຫາກັດສະປະເຖຣະ ຯລຯ ພຣະມະຫາກັດຈາຍະນະເຖຣະ ຯລຯ ພຣະມະຫາໂກດຖິກະເຖຣະ ຯລຯ ພຣະມະຫາປັນຖະກະເຖຣະ ບໍ່ໄດ້ເປັນພຣະອະຣະຫັນພ້ອມກັບການປະຕິສົນທິແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະມະຫາປັນຖະກະເຖຣະບໍ່ໄດ້ເປັນພຣະອະຣະຫັນພ້ອມກັບການປະຕິສົນທິ ທ່ານກໍບໍ່ຄວນຍອມຮັບວ່າ "ເປັນພຣະອະຣະຫັນພ້ອມກັບການປະຕິສົນທິໄດ້"

[໓໙໐] ສກ. ເປັນພຣະອະຣະຫັນພ້ອມກັບການປະຕິສົນທິໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນເຮັດໃຫ້ແຈ້ງອະຣະຫັດຕະຜົນໄດ້ດ້ວຍປະຕິສົນທິຈິດທີ່ເປັນໂລກິຍະ ຍັງມີອາສະວະ ຯລຯ ເປັນອາລົມຂອງສັງກິເລດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເປັນພຣະອະຣະຫັນພ້ອມກັບການປະຕິສົນທິໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ປະຕິສົນທິຈິດເປັນເຫດນຳອອກຈາກວັດຕະທຸກ ໃຫ້ເຖິງຄວາມສິ້ນກິເລດ ໃຫ້ເຖິງຄວາມຕັດສະຣູ້ ໃຫ້ເຖິງນິບພານ ບໍ່ເປັນອາລົມຂອງອາສະວະ ຯລຯ ບໍ່ເປັນອາລົມຂອງສັງກິເລດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ປະຕິສົນທິຈິດບໍ່ເປັນເຫດນຳສັດອອກຈາກວັດຕະທຸກ ບໍ່ໃຫ້ເຖິງຄວາມສິ້ນກິເລດ ບໍ່ໃຫ້ເຖິງຄວາມຕັດສະຣູ້ ບໍ່ໃຫ້ເຖິງນິບພານ ເປັນອາລົມຂອງອາສະວະ ຯລຯ ເປັນອາລົມຂອງສັງກິເລດບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກປະຕິສົນທິຈິດບໍ່ເປັນເຫດນຳສັດອອກຈາກວັດຕະທຸກ ບໍ່ໃຫ້ເຖິງຄວາມສິ້ນກິເລດ ບໍ່ໃຫ້ເຖິງຄວາມຕັດສະຮູ້ ບໍ່ໃຫ້ເຖິງນິບພານ ເປັນອາລົມຂອງອາສະວະ ຯລຯ ເປັນອາລົມຂອງສັງກິເລດ ທ່ານກໍບໍ່ຄວນຍອມຮັບວ່າ "ເປັນພຣະອະຣະຫັນພ້ອມກັບການປະຕິສົນທິໄດ້"

ສກ. ເປັນພຣະອະຣະຫັນພ້ອມກັບການປະຕິສົນທິໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນລະຣາຄະ ໂທສະ ໂມຫະ ອະໂນດຕັບປະໄດ້ດ້ວຍປະຕິສົນທິຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເປັນພຣະອະຣະຫັນພ້ອມກັບການປະຕິສົນທິໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ປະຕິສົນທິຈິດເປັນມັກ ຯລຯ ເປັນສະຕິປັດຖານ ຯລຯ ເປັນສຳມັບປະທານ ຯລຯ ເປັນອິດທິບາດ ຯລຯ ເປັນອິນຊີ ຯລຯ ເປັນພະລະ ຯລຯ ເປັນໂພດຊົງໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເປັນພຣະອະຣະຫັນພ້ອມກັບການປະຕິສົນທິໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນກຳນົດຮູ້ທຸກ ລະສະມຸໄທ ເຮັດໃຫ້ແຈ້ງນິໂຣດ ຈະເລີນມັກດ້ວຍປະຕິສົນທິຈິດໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເປັນພຣະອະຣະຫັນພ້ອມກັບການປະຕິສົນທິໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຈຸຕິຈິດເປັນມັກຄະຈິດ ປະຕິສົນທິຈິດເປັນຜົນລະຈິດໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

**ອຸປະປັດຕິກະຖາ ຈົບ**

## ៣. ອະນາສະວະກະຖາ (៣៥)

## ວ່າດ້ວຍສະພາວະທຳທີ່ບໍ່ເປັນອາລົມຂອງອາສະວະ

[៣៧១] ສກ. ສະພາວະທຳທັງປວງຂອງພຣະອະຣະຫັນ ບໍ່ເປັນອາລົມຂອງອາສະວະແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທັງປວງຂອງພຣະອະຣະຫັນເປັນມັກ ຯລຯ ຜົນ ຯລຯ ນິບພານ ຯລຯ ໂສດາປັດຕິມັກ ຯລຯ ໂສດາປັດຕິຜົນ ຯລຯ ສະກະທາຄາມິມັກ ຯລຯ ສະກະທາຄາມິ

ຜົນ ຯລຯ ອະນາຄາມິມັກ ຯລຯ ອະນາຄາມິຜົນ ຯລຯ ອະຣະຫັດຕະມັກ ຯລຯ ອະຣະຫັດຕະຜົນ ຯລຯ ສະຕິປັດຖານ ຯລຯ ສຳມັບປະທານ ຯລຯ ອິດທິບາດ ຯລຯ ອິນຊີ ຯລຯ ພະລະ ຯລຯ ໂພດຊົງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທັງປວງຂອງພຣະອະຣະຫັນບໍ່ເປັນອາລົມຂອງອາສະວະແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂຸຂອງພຣະອະຣະຫັນບໍ່ເປັນອາລົມຂອງອາສະວະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈັກຂຸຂອງພຣະອະຣະຫັນບໍ່ເປັນອາລົມຂອງອາສະວະແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂຸຂອງພຣະອະຣະຫັນເປັນມັກ ຯລຯ ຜົນ ຯລຯ ນິບພານ ຯລຯ ໂສດາປັດຕິມັກ ຯລຯ ໂສດາປັດຕິຜົນ ຯລຯ ໂພດຊົງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂສຕະ ຯລຯ ຄານະ ຯລຯ ຊິວຫາ ຯລຯ ກາຍຂອງພຣະອະຣະຫັນບໍ່ເປັນອາລົມຂອງອາສະວະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກາຍຂອງພຣະອະຣະຫັນບໍ່ເປັນອາລົມຂອງອາສະວະແມ່ນບໍ?

ປຣ. ແມ່ນ

ສກ. ກາຍຂອງພຣະອະຣະຫັນເປັນມັກ ຯລຯ ຜົນ ຯລຯ ນິບພານ ຯລຯ ໂສດາປັດຕິມັກ ຯລຯ ໂສດາປັດຕິຜົນ ຯລຯ ໂພດຊົງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກາຍຂອງພຣະອະຣະຫັນບໍ່ເປັນອາລົມຂອງອາສະວະແມ່ນບໍ?

ປຣ. ແມ່ນ

ສກ. ກາຍຂອງພຣະອະຣະຫັນຍັງຖືກ ຍ້ອງຍໍແລະຖືກຂົ່ມ ຖືກຕັດແລະທຳລາຍ ເປັນຂອງທົ່ວໄປແກ່ຝູງກາ ແຮ້ງ ແລະແຫຼວແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ບໍ່ເປັນອາລົມຂອງອາສະວະຍັງຖືກຍ້ອງຍໍແລະຖືກຂົ່ມ ຍັງຖືກຕັດແລະທຳລາຍ ເປັນຂອງທົ່ວໄປແກ່ຝູງກາ ແຮ້ງ ແລະແຫຼວແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຢາພິດ ອາວຸດ ໄຟ ເພິ່ງແຊກຊຶມເຂົ້າໄປໃນກາຍຂອງພຣະອະຣະຫັນໄດ້ ແມ່ນບໍ?

ປຣ. ແມ່ນ

ສກ. ຢາພິດ ອາວຸດ ໄຟ ເພິ່ງແຊກຊຶມເຂົ້າໄປໃນສະພາວະທຳທີ່ບໍ່ເປັນອາລົມຂອງອາສະວະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກາຍຂອງພຣະອະຣະຫັນຍັງຖືກຈອງຈຳດ້ວຍເຄື່ອງຈອງຈຳຄືຂື່ຄາ ເຄື່ອງຈອງຈຳຄືເຊືອກ ເຄື່ອງຈອງຈຳຄືໂສ້ ເຄື່ອງຈອງຈຳຄືເຮືອນ ເຄື່ອງຈອງຈຳຄືນິຄົມ ເຄື່ອງຈອງຈຳຄືນະຄອນ ເຄື່ອງຈອງຈຳຄືຊົນນະບົດ ດ້ວຍການຈອງຈຳມີການຜູກຢູ່ຄໍເປັນທີ ໕ ແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ບໍ່ເປັນອາລົມຂອງອາສະວະ ຍັງຖືກຈອງຈຳດ້ວຍເຄື່ອງຈອງຈຳຄື ຂື່ຄາ ເຄື່ອງຈອງຈຳຄືເຊືອກ ເຄື່ອງຈອງຈຳຄືໂສ້ ເຄື່ອງຈອງຈຳຄືເຮືອນ ເຄື່ອງຈອງຈຳຄືນິຄົມ ເຄື່ອງຈອງຈຳຄືນະຄອນ ເຄື່ອງຈອງຈຳຄືຊົນນະບົດ ດ້ວຍການຈອງຈຳມີການຜູກຢູ່ຄໍເປັນທີ ໕ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໓໙໘] ສກ. ຫາກພຣະອະຣະຫັນໃຫ້ຈີວອນແກ່ປຸຖຸຊົນ ຈີວອນນັ້ນບໍ່ເປັນອາລົມຂອງອາສະວະແລ້ວເປັນອາລົມຂອງອາສະວະໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈີວອນນັ້ນບໍ່ເປັນອາລົມຂອງອາສະວະແລ້ວເປັນອາລົມຂອງອາສະວະໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຈີວອນທີ່ບໍ່ເປັນອາລົມຂອງອາສະວະກັບຈີວອນທີ່ເປັນອາລົມຂອງອາສະວະເປັນອັນດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈີວອນທີ່ບໍ່ເປັນອາລົມຂອງອາສະວະກັບຈີວອນທີ່ເປັນອາລົມຂອງອາສະວະເປັນອັນດຽວກັນແມ່ນບໍ?

ປຣ. ແມ່ນ

ສກ. ມັກບໍ່ເປັນອາລົມຂອງອາສະວະແລ້ວເປັນອາລົມຂອງອາສະວະໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຜົນ ຯລຯ ສະຕິປັດຖານ ຯລຯ ສຳມັບປະທານ ຯລຯ ອິດທິບາດ ຯລຯ ອິນຊີ ຯລຯ ພະລະ ຯລຯ ໂພດຊົງ ບໍ່ເປັນອາລົມຂອງອາສະວະ ແຕ່ເປັນອາລົມຂອງອາສະວະໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຫາກພຣະອະຣະຫັນໃຫ້ບິນທະບາດ ຯລຯ ເສນາສະນະ ຯລຯ ຄິລານະປັດໄຈເພສັດບໍຣິຂານແກ່ປຸຖຸຊົນ ຄິລານະປັດໄຈເພສັດບໍຣິຂານນັ້ນ ບໍ່ເປັນອາລົມຂອງອາສະວະແລ້ວເປັນອາລົມຂອງອາສະວະໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄິລານະປັດໄຈເພສັດບໍຣິຂານນັ້ນ ບໍ່ເປັນອາລົມຂອງອາສະວະແລ້ວເປັນອາລົມຂອງອາສະວະໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ສິ່ງທີ່ບໍ່ເປັນອາລົມຂອງອາສະວະກັບຈີວອນທີ່ເປັນອາລົມຂອງອາສະວະເປັນອັນດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສິ່ງທີ່ບໍ່ເປັນອາລົມຂອງອາສະວະກັບຈີວອນທີ່ເປັນອາລົມຂອງອາສະວະເປັນອັນດຽວກັນແມ່ນບໍ?

ປຣ. ແມ່ນ

ສກ. ມັກບໍ່ເປັນອາລົມຂອງອາສະວະແລ້ວເປັນອາລົມຂອງອາສະວະໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຜົນ ຯລຯ ສະຕິປັດຖານ ຯລຯ ສໍາມັບປະທານ ຯລຯ ອິດທິບາດ ຯລຯ ອິນຊີ ຯລຯ ພະລະ ຯລຯ ໂພດຊົງ ບໍ່ເປັນອາລົມຂອງອາສະວະແລ້ວເປັນອາລົມຂອງອາສະວະໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຫາກປຸຖຸຊົນຖວາຍຈີວອນແກ່ພຣະອະຣະຫັນ ຈີວອນນັ້ນເປັນອາລົມຂອງອາສະວະແລ້ວ ບໍ່ເປັນອາລົມຂອງອາສະວະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈີວອນນັ້ນເປັນອາລົມຂອງອາສະວະແລ້ວບໍ່ເປັນອາລົມຂອງອາສະວະໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ສິ່ງທີ່ເປັນອາລົມຂອງອາສະວະກັບຈີວອນທີ່ບໍ່ເປັນອາລົມຂອງອາສະວະເປັນອັນດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສິ່ງທີ່ເປັນອາລົມຂອງອາສະວະກັບຈີວອນທີ່ບໍ່ເປັນອາລົມຂອງອາສະວະເປັນອັນດຽວກັນແມ່ນບໍ?

ປຣ. ແມ່ນ

ສກ. ຣາຄະເປັນອາລົມຂອງອາສະວະແລ້ວບໍ່ເປັນອາລົມຂອງອາສະວະໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂທສະ ຯລຯ ໂມຫະ ຯລຯ ອະໂນດຕັບປະ ເປັນອາລົມຂອງອາສະວະແລ້ວບໍ່ເປັນອາລົມຂອງອາສະວະໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຫາກປຸຖຸຊົນຖວາຍບິນທະບາດ ຯລຯ ເສນາສະນະ ຯລຯ ຄິລານະປັດໄຈເພສັດບໍຣິຂານແກ່ພຣະອະຣະຫັນ ຄິລານະປັດໄຈເພສັດບໍຣິຂານນັ້ນ ເປັນອາລົມຂອງອາສະວະແລ້ວບໍ່ເປັນອາລົມຂອງອາສະວະໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄິລານະປັດໄຈເພສັດບໍຣິຂານນັ້ນເປັນອາລົມຂອງອາສະວະແລ້ວບໍ່ເປັນອາລົມຂອງອາສະວະໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ສິ່ງທີ່ເປັນອາລົມຂອງອາສະວະກັບຈິວອນທີ່ບໍ່ເປັນອາລົມຂອງອາສະວະເປັນອັນດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສິ່ງທີ່ເປັນອາລົມຂອງອາສະວະກັບຈິວອນທີ່ບໍ່ເປັນອາລົມຂອງອາສະວະເປັນອັນດຽວກັນແມ່ນບໍ?

ປຣ. ແມ່ນ

ສກ. ຣາຄະເປັນອາລົມຂອງອາສະວະແລ້ວບໍ່ເປັນອາລົມຂອງອາສະວະໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂທສະ ຯລຯ ໂມຫະ ຯລຯ ອະໂນດຕັບປະເປັນອາລົມຂອງອາສະວະແລ້ວບໍ່ເປັນອາລົມຂອງອາສະວະໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ທ່ານບໍ່ຍອມຮັບວ່າ "ສະພາວະທຳທັງປວງຂອງພຣະອະຣະຫັນບໍ່ເປັນອາລົມຂອງອາສະວະ" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະອະຣະຫັນເປັນຜູ້ບໍ່ມີອາສະວະບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກພຣະອະຣະຫັນເປັນຜູ້ບໍ່ມີອາສະວະ ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ສະພາວະທຳທັງປວງຂອງພຣະອະຣະຫັນບໍ່ເປັນອາລົມຂອງອາສະວະ"

**ອະນາສະວະກະຖາ ຈົບ**

# ໔. ສະມັນນາກະຕະກະຖາ (໓໖)

## ວ່າດ້ວຍຜູ້ບໍລິບູນ

[໓໙໓] ສກ. ພຣະອະຣະຫັນບໍລິບູນດ້ວຍຜົນ ໔ ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນບໍລິບູນດ້ວຍຜັດສະ ໔ ຯລຯ ເວທະນາ ໔ ຯລຯ ສັນຍາ ໔ ຯລຯ ເຈຕະນາ ໔ ຯລຯ ຈິດ ໔ ຯລຯ ສັດທາ ໔ ຯລຯ ວິຣິຍະ ໔ ຯລຯ ສະຕິ ໔ ຯລຯ ສະມາທິ ໔ ຯລຯ ປັນຍາ ໔ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະນາຄາມີບໍລິບູນດ້ວຍຜົນ ໓ ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະນາຄາມີບໍລິບູນດ້ວຍຜັດສະ ໓ ຯລຯ ປັນຍາ ໓ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະສະກະທາຄາມີບໍລິບູນດ້ວຍຜົນ ໒ ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສະກະທາຄາມີບໍລິບູນດ້ວຍຜັດສະ ໒ ຯລຯ ປັນຍາ ໒ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນບໍລິບູນດ້ວຍໂສດາປັດຕິຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນເປັນພຣະໂສດາບັນຜູ້ສັດຕັກຂັດຕຸປະຣະມະ ໂກລັງໂກລະ ເອກະພິຊີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນບໍລິບູນດ້ວຍສະກະທາຄາມີຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນເປັນພຣະສະກະທາຄາມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນບໍລິບູນດ້ວຍອະນາຄາມີຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນເປັນພຣະອະນາຄາມີຜູ້ອັນຕະຣາປະຣິນິບພາຍີ ອຸປະຫັດຈະປະຣິນິບພາຍີ ອະສັງຂາຣະປະຣິນິບພາຍີ ສະສັງຂາຣະປະຣິນິບພາຍີ ອຸດທັງໂສໂຕອະກະນິດຖະຄາມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະນາຄາມີບໍລິບູນດ້ວຍໂສດາປັດຕິຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະນາຄາມີເປັນພຣະໂສດາບັນຜູ້ສັດຕັກຂັດຕຸປະຣະມະ ໂກລັງໂກລະເອກະພິຊີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະນາຄາມີບໍລິບູນດ້ວຍສະກະທາຄາມີຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະນາຄາມີເປັນພຣະສະກະທາຄາມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະສະກະທາຄາມີບໍລິບູນດ້ວຍໂສດາປັດຕິຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະສະກະທາຄາມີເປັນພຣະໂສດາບັນຜູ້ສັດຕັກຂັດຕຸປະຣະມະ ໂກລັງໂກລະເອກະພິຊີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໓໙໔] ສກ. ຜູ້ບໍລິບູນດ້ວຍໂສດາປັດຕິຜົນ ທ່ານຍອມຮັບວ່າ "ເປັນພຣະໂສດາບັນ" ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນບໍລິບູນດ້ວຍໂສດາປັດຕິຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນກັບພຣະໂສດາບັນເປັນອັງດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຜູ້ບໍລິບູນດ້ວຍສະກະທາຄາມີຜົນ ທ່ານຍອມຮັບວ່າ "ເປັນພຣະສະກະທາຄາມີ" ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນບໍລິບູນດ້ວຍສະກະທາຄາມີຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນກັບພຣະສະກະທາຄາມີເປັນອັງດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຜູ້ບໍລິບູນດ້ວຍອະນາຄາມີຜົນ ທ່ານຍອມຮັບວ່າ "ເປັນພຣະອະນາຄາມີ" ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນບໍລິບູນດ້ວຍອະນາຄາມິຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນກັບພຣະອະນາຄາມີເປັນອັງດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຜູ້ບໍລິບູນດ້ວຍໂສດາປັດຕິຜົນ ທ່ານຍອມຮັບວ່າ "ເປັນພຣະໂສດາບັນ" ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະນາຄາມີບໍລິບູນດ້ວຍໂສດາປັດຕິຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະນາຄາມີກັບພຣະໂສດາບັນເປັນອັງດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຜູ້ບໍລິບູນດ້ວຍສະກະທາຄາມິຜົນ ທ່ານຍອມຮັບວ່າ "ເປັນພຣະສະກະທາຄາມີ" ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະນາຄາມີບໍລິບູນດ້ວຍສະກະທາຄາມິຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະນາຄາມີກັບພຣະສະກະທາຄາມີເປັນອັງດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຜູ້ບໍລິບູນດ້ວຍໂສດາປັດຕິຜົນ ທ່ານຍອມຮັບວ່າ "ເປັນພຣະໂສດາບັນ" ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສະກະທາຄາມີບໍລິບູນດ້ວຍໂສດາປັດຕິຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະສະກະທາຄາມີກັບພຣະໂສດາບັນເປັນອັງດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໓໙໕] ສກ. ພຣະອະຣະຫັນບໍລິບູນດ້ວຍໂສດາປັດຕິຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນລ່ວງເລີຍໂສດາປັດຕິຜົນໄປແລ້ວບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະອະຣະຫັນລ່ວງເລີຍໂສດາປັດຕິຜົນໄປແລ້ວ ທ່ານກໍບໍ່ຄວນຍອມຮັບວ່າ "ພຣະອະຣະຫັນບໍລິບູນດ້ວຍໂສດາປັດຕິຜົນ"

ສກ. ພຣະອະຣະຫັນລ່ວງເລີຍໂສດາປັດຕິຜົນໄປແລ້ວ ຊື່ວ່າ ບໍລິບູນດ້ວຍໂສດາປັດຕິຜົນນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນລ່ວງເລີຍໂສດາປັດຕິມັກໄປແລ້ວ ລ່ວງເລີຍສັກກາຍະທິດຖິ ວິຈິກິດສາ ສີລັບພະຕະປະຣາມາດ ຣາຄະ ໂທສະ ໂມຫະ ທີ່ເປັນເຫດໃຫ້ສັດໄປສູ່ອະບາຍໄດ້ແລ້ວ ຊື່ວ່າບໍລິບູນດ້ວຍສະພາວະທຳມີສັກກາຍະທິດຖິເປັນຕົ້ນນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນບໍລິບູນດ້ວຍສະກະທາຄາມີຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນລ່ວງເລີຍສະກະທາຄາມີຜົນໄປແລ້ວບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະອະຣະຫັນລ່ວງເລີຍສະກະທາຄາມີຜົນໄປແລ້ວ ທ່ານກໍບໍ່ຄວນຍອມຮັບວ່າ "ພຣະອະຣະຫັນບໍລິບູນດ້ວຍສະກະທາຄາມີຜົນ"

ສກ. ພຣະອະຣະຫັນລ່ວງເລີຍສະກະທາຄາມີຜົນໄປແລ້ວ ຊື່ວ່າບໍລິບູນດ້ວຍສະກະທາຄາມີຜົນ ນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນລ່ວງເລີຍສະກະທາຄາມີມັກໄປແລ້ວ ລ່ວງເລີຍກາມຣາຄະຢ່າງຫຍາບ ພະຍາບາດຢ່າງຫຍາບໄດ້ແລ້ວ ຊື່ວ່າບໍລິບູນດ້ວຍກາມຣາຄະ ແລະພະຍາບາດນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນບໍລິບູນດ້ວຍອະນາຄາມີຜົນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນລ່ວງເລີຍອະນາຄາມີຜົນໄປແລ້ວບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະອະຣະຫັນລ່ວງເລີຍອະນາຄາມີຜົນໄປແລ້ວ ທ່ານກໍບໍ່ຄວນຍອມຮັບວ່າ "ພຣະອະຣະຫັນບໍລິບູນດ້ວຍອະນາຄາມີຜົນ"

ສກ. ພຣະອະຣະຫັນລ່ວງເລີຍອະນາຄາມີຜົນໄປແລ້ວ ຊື່ວ່າບໍລິບູນດ້ວຍອະນາຄາມີຜົນນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນລ່ວງເລີຍອະນາຄາມີມັກໄປແລ້ວ ລ່ວງເລີຍກາມຣາຄະຢ່າງລະອຽດ ພະຍາບາດຢ່າງລະອຽດໄດ້ແລ້ວ ຊື່ວ່າບໍລິບູນດ້ວຍກາມຣາຄະແລະພະຍາບາດນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

สภ. พระอะนาคามิบํลิบูนด้วยโสดาปัดติผินแม่นบํ?

ปร. แม่น

สภ. พระอะนาคามิล่วงเลียโสดาปัดติผินไปแล้วบํ่แม่นบํ?

ปร. แม่น

สภ. หากพระอะนาคามิล่วงเลียโสดาปัดติผินไปแล้ว ท่านกํบํ่ควนยอมรับ

ว่า "พระอะนาคามิบํลิบูนด้วยโสดาปัดติผิน"

สภ. พระอะนาคามิล่วงเลียโสดาปัดติผินไปแล้ว ซื่ว่าบํลิบูนด้วยโสดาปัดติผิน นั้นแม่นบํ?

ปร. แม่น

สภ. พระอะนาคามิล่วงเลียโสดาปัดติมักไปแล้ว ล่วงเลียสักกายะทิดถิ ฯลฯ ล่วงเลียโมหะที่เป็นเหดใຫ้สัดไปสู่อะบายได้แล้ว ซื่ว่าบํลิบูนด้วยสะพาวะทํามิสักกายะทิดถิเป็นต้นนั้นแม่นบํ?

ปร. บํ่ควนก่าวแนวนั้น ฯลฯ

สภ. พระอะนาคามิบํลิบูนด้วยสะกะทาคามิผินแม่นบํ?

ปร. แม่น

สภ. พระอะนาคามิล่วงเลียสะกะทาคามิผินไปแล้วบํ่แม่นบํ?

ปร. แม่น

สภ. หากพระอะนาคามิล่วงเลียสะกะทาคามิผินไปแล้ว ท่านกํบํ่ควนยอมรับ ว่า "พระอะนาคามิบํลิบูนด้วยสะกะทาคามิผิน"

สภ. พระอะนาคามิล่วงเลียสะกะทาคามิผินไปแล้ว ซื่ว่าบํลิบูนด้วยสะกะทาคามิผิน นั้นแม่นบํ?

ปร. แม่น

สภ. พระอะนาคามิล่วงเลียสะกะทาคามิมักไปแล้ว ล่วงเลียกามะราคะอย่างหยาบ พะยาบาดอย่างหยาบได้แล้ว ซื่ว่าบํลิบูนด้วยกามะราคะและพะยาบาดนั้นแม่นบํ?

ปร. บํ่ควนก่าวแนวนั้น ฯลฯ

สภ. พระสะกะทาคามิบํลิบูนด้วยโสดาปัดติผินแม่นบํ?

ปร. แม่น

สภ. พระสะกะทาคามิล่วงเลียโสดาปัดติผินไปแล้วบํ่แม่นบํ?

ปร. แม่น

สภ. หากพระสะกะทาคามิล่วงเลียโสดาปัดติผินไปแล้ว ท่านกํบํ่ควนยอมรับ ว่า "พระสะกะทาคามิบํลิบูนด้วยโสดาปัดติผิน"

ສກ. ພຣະສະກະທາຄາມີລ່ວງເລີຍໂສດາປັດຕິຜົນໄປແລ້ວ ຊື່ວ່າບໍລິບູນດ້ວຍໂສດາປັດຕິຜົນ ນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ພຣະສະກະທາຄາມີລ່ວງເລີຍໂສດາປັດຕິມັກໄປແລ້ວ ລ່ວງເລີຍສັກກາຍະທິດຖິ ຯລຯ ລ່ວງເລີຍໂມຫະທີ່ເປັນເຫດໃຫ້ສັດໄປສູ່ອະບາຍໄດ້ແລ້ວ ຊື່ວ່າບໍລິບູນດ້ວຍສະພາວະທຳມີສັກກາຍະທິດຖິເປັນຕົ້ນນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໓໙໖] ປຣ. ທ່ານບໍ່ຍອມຮັບວ່າ "ພຣະອະຣະຫັນບໍລິບູນດ້ວຍຜົນ ໔" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະອະຣະຫັນໄດ້ຜົນ ໔ ແລ້ວຍັງບໍ່ເສື່ອມຈາກຜົນ ໔ ນັ້ນບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກພຣະອະຣະຫັນໄດ້ຜົນ ໔ ແລ້ວຍັງບໍ່ເສື່ອມຈາກຜົນ ໔ ນັ້ນ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ພຣະອະຣະຫັນບໍລິບູນດ້ວຍຜົນ ໔"

ປຣ. ທ່ານບໍ່ຍອມຮັບວ່າ "ພຣະອະນາຄາມີບໍລິບູນດ້ວຍຜົນ ໓" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະອະນາຄາມີໄດ້ຜົນ ໓ ແລ້ວຍັງບໍ່ເສື່ອມຈາກຜົນ ໓ ນັ້ນບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກພຣະອະນາຄາມີໄດ້ຜົນ ໓ ແລ້ວຍັງບໍ່ເສື່ອມຈາກຜົນ ໓ ນັ້ນ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ພຣະອະນາຄາມີບໍລິບູນດ້ວຍຜົນ ໓"

ປຣ. ທ່ານບໍ່ຍອມຮັບວ່າ "ພຣະສະກະທາຄາມີບໍລິບູນດ້ວຍຜົນ ໒" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສະກະທາຄາມີໄດ້ຜົນ ໒ ແລ້ວຍັງບໍ່ເສື່ອມຈາກຜົນ ໒ ນັ້ນບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກພຣະສະກະທາຄາມີໄດ້ຜົນ ໒ ແລ້ວຍັງບໍ່ເສື່ອມຈາກຜົນ ໒ ນັ້ນ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ພຣະສະກະທາຄາມີບໍລິບູນດ້ວຍຜົນ ໒"

ສກ. ພຣະອະຣະຫັນໄດ້ຜົນ ໔ ແລ້ວຍັງບໍ່ເສື່ອມຈາກຜົນ ໔ ນັ້ນ ດັ່ງນັ້ນ ຈຶ່ງຊື່ວ່າບໍລິບູນດ້ວຍຜົນ ໔ ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນໄດ້ມັກ ໔ ແລ້ວຍັງບໍ່ເສື່ອມຈາກມັກ ໔ ນັ້ນ ດັ່ງນັ້ນ ຈຶ່ງຊື່ວ່າບໍລິບູນດ້ວຍມັກ ໔ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະນາຄາມີໄດ້ຜົນ ໓ ແລ້ວຍັງບໍ່ເສື່ອມຈາກຜົນ ໓ ນັ້ນ ດັ່ງນັ້ນ ຈຶ່ງຊື່ວ່າ ບໍລິບູນດ້ວຍຜົນ ໓ ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະນາຄາມີໄດ້ມັກ ໓ ແລ້ວຍັງບໍ່ເສື່ອມຈາກມັກ ໓ ນັ້ນ ດັ່ງນັ້ນ ຈຶ່ງຊື່ວ່າ ບໍລິບູນດ້ວຍມັກ ໓ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະສະກະທາຄາມີໄດ້ຜົນ ແລ້ວຍັງບໍ່ເສື່ອມຈາກຜົນ ໔ ນັ້ນ ດັ່ງນັ້ນ ຈຶ່ງຊື່ວ່າ ບໍລິບູນດ້ວຍຜົນ ໔ ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສະກະທາຄາມີໄດ້ມັກ ໔ ແລ້ວຍັງບໍ່ເສື່ອມຈາກມັກ ໔ ນັ້ນ ດັ່ງນັ້ນ ຈຶ່ງຊື່ວ່າ ບໍລິບູນດ້ວຍມັກ ໔ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

**ສະມັນນາກະຕະກະຖາ ຈົບ**

## ໕. ອຸເປກຂາສະມັນນາກະຕະກະຖາ (໓໗)

## ວ່າດ້ວຍຜູ້ບໍລິບູນດ້ວຍອຸເປກຂາ

[໓໙໗] ສກ. ພຣະອະຣະຫັນບໍລິບູນດ້ວຍອຸເປກຂາ ໖ ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນບໍລິບູນດ້ວຍຜັດສະ ໖ ຯລຯ ເວທະນາ ໖ ຯລຯ ສັນຍາ ໖ ປັນຍາ ໖ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນບໍລິບູນດ້ວຍອຸເປກຂາ ໖ ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນເຫັນຮູບທາງຕາ ຟັງສຽງທາງຫູ ດົມກິ່ນທາງດັງ ຊີມຣົດທາງລີ້ນ ຖືກຕ້ອງໂຜດຖັບພະທາງກາຍ ຮູ້ທຳມາຣົມທາງໃຈ ຯລຯ ເມື່ອຮູ້ທຳມາຣົມທາງໃຈ ຈຶ່ງເຫັນຮູບທາງຕາ ຟັງສຽງທາງຫູ ດົມກິ່ນທາງດັງ ຊີມຣົດທາງລີ້ນ ຖືກຕ້ອງໂຜດຖັບພະ ທາງກາຍແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນບໍລິບູນດ້ວຍອຸເປກຂາ ໖ ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນບໍລິບູນ ໝັ້ນຄົງດ້ວຍອຸເປກຂາ ໖ ເນືອງ ໆ ສະໝ່ຳສະເໝີ ບໍ່ປະປົນກັນ ອຸເປກຂາ ໖ ຜາກົດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ທ່ານບໍ່ຍອມຮັບວ່າ "ພຣະອະຣະຫັນບໍລິບູນດ້ວຍອຸເປກຂາ ໖" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະອະຣະຫັນມີອຸເປກຂາ ໖ ບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກພຣະອະຣະຫັນມີອຸເປກຂາ ໖ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ພຣະອະຣະຫັນ ບໍລິບູນດ້ວຍອຸເປກຂາ ໖"

**ອຸເປກຂາສະມັນນາກະຕະກະຖາ ຈົບ**

# ໖. ໂພທິຍາພຸດໂທຕິກະຖາ (໓໗)

## ວ່າດ້ວຍຊື່ວ່າພຸດທະຍ້ອນປັນຍາເປັນເຄື່ອງຕັດສະຮູ້

[໓໘໗] ສກ. ຊື່ວ່າພຸດທະ ຍ້ອນປັນຍາເປັນເຄື່ອງຕັດສະຮູ້ແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອປັນຍາເປັນເຄື່ອງຕັດສະຮູ້ດັບໄປ ຫາຍໄປ ລະງັບໄປແລ້ວ ບໍ່ຈັດວ່າເປັນພຸດທະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຊື່ວ່າພຸດທະ ຍ້ອນປັນຍາເປັນເຄື່ອງຕັດສະຮູ້ແມ່ນບໍ?

ປຣ. ແມ່ນ

ສກ. ຊື່ວ່າພຸດທະ ຍ້ອນປັນຍາເປັນເຄື່ອງຕັດສະຮູ້ທີ່ເປັນອະດີດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຊື່ວ່າພຸດທະ ຍ້ອນປັນຍາເປັນເຄື່ອງຕັດສະຮູ້ທີ່ເປັນອະດີດແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນເຮັດກິດທີ່ຄວນເຮັດດ້ວຍປັນຍາເປັນເຄື່ອງຕັດສະຮູ້ໄດ້ດ້ວຍປັນຍາເປັນເຄື່ອງຕັດສະຮູ້ທີ່ເປັນອະດີດນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນເຮັດກິດທີ່ຄວນເຮັດດ້ວຍປັນຍາເປັນເຄື່ອງຕັດສະຮູ້ໄດ້ດ້ວຍປັນຍາເປັນເຄື່ອງຕັດສະຮູ້ທີ່ເປັນອະດີດນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ກຳນົດຮູ້ທຸກ ລະສະມຸໄທ ເຮັດໃຫ້ແຈ້ງນິໂຣດ ຈະເລີນມັກດ້ວຍປັນຍາເປັນເຄື່ອງຕັດສະຣູ້ທີ່ເປັນອະດີດນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຊື່ວ່າພຸດທະ ຍ້ອນປັນຍາເປັນເຄື່ອງຕັດສະຣູ້ແມ່ນບໍ?

ປຣ. ແມ່ນ

ສກ. ຊື່ວ່າພຸດທະ ຍ້ອນປັນຍາເປັນເຄື່ອງຕັດສະຣູ້ທີ່ເປັນອະນາຄົດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຊື່ວ່າພຸດທະ ຍ້ອນປັນຍາເປັນເຄື່ອງຕັດສະຣູ້ທີ່ເປັນອະນາຄົດແມ່ນບໍ?

ປຣ. ແມ່ນ

ສກ. ເຮັດກິດທີ່ຄວນເຮັດດ້ວຍປັນຍາເປັນເຄື່ອງຕັດສະຣູ້ໄດ້ດ້ວຍປັນຍາເປັນເຄື່ອງຕັດສະຣູ້ທີ່ເປັນອະນາຄົດນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເຮັດກິດທີ່ຄວນເຮັດດ້ວຍປັນຍາເປັນເຄື່ອງຕັດສະຣູ້ໄດ້ດ້ວຍປັນຍາເປັນເຄື່ອງຕັດສະຣູ້ທີ່ເປັນອະນາຄົດນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ກຳນົດຮູ້ທຸກ ຯລຯ ຈະເລີນມັກດ້ວຍປັນຍາເປັນເຄື່ອງຕັດສະຣູ້ທີ່ເປັນອະນາຄົດນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຊື່ວ່າພຸດທະ ຍ້ອນປັນຍາເປັນເຄື່ອງຕັດສະຣູ້ທີ່ເປັນປັດຈຸບັນ ເຮັດກິດທີ່ຄວນເຮັດດ້ວຍປັນຍາເປັນເຄື່ອງຕັດສະຣູ້ໄດ້ດ້ວຍປັນຍາເປັນເຄື່ອງຕັດສະຣູ້ທີ່ເປັນປັດຈຸບັນນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ຊື່ວ່າພຸດທະ ຍ້ອນປັນຍາເປັນເຄື່ອງຕັດສະຣູ້ທີ່ເປັນອະດີດ ເຮັດກິດທີ່ຄວນເຮັດດ້ວຍປັນຍາເປັນເຄື່ອງຕັດສະຣູ້ໄດ້ດ້ວຍປັນຍາເປັນເຄື່ອງຕັດສະຣູ້ທີ່ເປັນອະດີດນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຊື່ວ່າພຸດທະ ຍ້ອນປັນຍາເປັນເຄື່ອງຕັດສະຣູ້ທີ່ເປັນປັດຈຸບັນ ກຳນົດຮູ້ທຸກ ລະສະມຸໄທ ເຮັດໃຫ້ແຈ້ງນິໂຣດ ຈະເລີນມັກດ້ວຍປັນຍາເປັນເຄື່ອງຕັດສະຣູ້ທີ່ເປັນປັດຈຸບັນນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ຊື່ວ່າພຸດທະ ຍ້ອນປັນຍາເປັນເຄື່ອງຕັດສະຣູ້ທີ່ເປັນອະດີດ ກຳນົດຮູ້ທຸກ ຯລຯ ຈະເລີນມັກດ້ວຍປັນຍາເປັນເຄື່ອງຕັດສະຣູ້ທີ່ເປັນອະດີດນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຊື່ວ່າພຸດທະ ຍ້ອນປັນຍາເປັນເຄື່ອງຕັດສະຣູ້ທີ່ເປັນປັດຈຸບັນ ເຮັດກິດທີ່ຄວນເຮັດ

ດ້ວຍປັນຍາເປັນເຄື່ອງຕັດສະຣູ້ໄດ້ດ້ວຍປັນຍາເປັນເຄື່ອງຕັດສະຣູ້ທີ່ເປັນປັດຈຸບັນນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ຊື່ວ່າພຸດທະ ຍ້ອນປັນຍາເປັນເຄື່ອງຕັດສະຣູ້ທີ່ເປັນອະນາຄົດ ເຮັດກິດທີ່ຄວນເຮັດດ້ວຍປັນຍາເປັນເຄື່ອງຕັດສະຣູ້ໄດ້ດ້ວຍປັນຍາເປັນເຄື່ອງຕັດສະຣູ້ທີ່ເປັນອະນາຄົດນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຊື່ວ່າພຸດທະ ຍ້ອນປັນຍາເປັນເຄື່ອງຕັດສະຣູ້ທີ່ເປັນປັດຈຸບັນ ກຳນົດຣູ້ທຸກ ฯລฯ ຈະເລີນມັກດ້ວຍປັນຍາເປັນເຄື່ອງຕັດສະຣູ້ທີ່ເປັນປັດຈຸບັນນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ຊື່ວ່າພຸດທະ ຍ້ອນປັນຍາເປັນເຄື່ອງຕັດສະຣູ້ທີ່ເປັນອະນາຄົດ ກຳນົດຣູ້ທຸກ ฯລฯ ຈະເລີນມັກດ້ວຍປັນຍາເປັນເຄື່ອງຕັດສະຣູ້ທີ່ເປັນອະນາຄົດນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຊື່ວ່າພຸດທະ ຍ້ອນປັນຍາເປັນເຄື່ອງຕັດສະຣູ້ທີ່ເປັນອະດີດ ແຕ່ບໍ່ເຮັດກິດທີ່ຄວນເຮັດດ້ວຍປັນຍາເປັນເຄື່ອງຕັດສະຣູ້ໄດ້ດ້ວຍປັນຍາເປັນເຄື່ອງຕັດສະຣູ້ທີ່ເປັນອະດີດນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ຊື່ວ່າພຸດທະ ຍ້ອນປັນຍາເປັນເຄື່ອງຕັດສະຣູ້ທີ່ເປັນປັດຈຸບັນ ແຕ່ບໍ່ເຮັດກິດທີ່ຄວນເຮັດດ້ວຍປັນຍາເປັນເຄື່ອງຕັດສະຣູ້ ໄດ້ດ້ວຍປັນຍາເປັນເຄື່ອງຕັດສະຣູ້ທີ່ເປັນປັດຈຸບັນນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຊື່ວ່າພຸດທະ ຍ້ອນປັນຍາເປັນເຄື່ອງຕັດສະຣູ້ທີ່ເປັນອະດີດ ແຕ່ບໍ່ກຳນົດຣູ້ທຸກ ฯລฯ ຈະເລີນມັກດ້ວຍປັນຍາເປັນເຄື່ອງຕັດສະຣູ້ທີ່ເປັນອະດີດນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ຊື່ວ່າພຸດທະ ຍ້ອນປັນຍາເປັນເຄື່ອງຕັດສະຣູ້ທີ່ເປັນປັດຈຸບັນ ແຕ່ບໍ່ກຳນົດຣູ້ທຸກ ฯລฯ ຈະເລີນມັກດ້ວຍປັນຍາເປັນເຄື່ອງຕັດສະຣູ້ທີ່ເປັນປັດຈຸບັນນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຊື່ວ່າພຸດທະ ຍ້ອນປັນຍາເປັນເຄື່ອງຕັດສະຣູ້ທີ່ເປັນອະນາຄົດ ແຕ່ບໍ່ເຮັດກິດທີ່ຄວນເຮັດດ້ວຍປັນຍາເປັນເຄື່ອງຕັດສະຣູ້ໄດ້ດ້ວຍປັນຍາ ເປັນເຄື່ອງຕັດສະຣູ້ທີ່ເປັນອະນາຄົດນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ຊື່ວ່າພຸດທະ ຍ້ອນປັນຍາເປັນເຄື່ອງຕັດສະຣູ້ທີ່ເປັນປັດຈຸບັນ ແຕ່ບໍ່ເຮັດກິດທີ່ຄວນເຮັດດ້ວຍປັນຍາເປັນເຄື່ອງຕັດສະຣູ້ໄດ້ດ້ວຍປັນຍາ ເປັນເຄື່ອງຕັດສະຣູ້ທີ່ເປັນປັດຈຸບັນນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຊື່ວ່າພຸດທະ ຍ້ອນປັນຍາເປັນເຄື່ອງຕັດສະຣູ້ທີ່ເປັນອະນາຄົດ ແຕ່ບໍ່ກຳນົດຣູ້ທຸກ ฯລฯ ຈະເລີນມັກດ້ວຍປັນຍາເປັນເຄື່ອງຕັດສະຣູ້ທີ່ເປັນອະນາຄົດນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ຊື່ວ່າພຸດທະ ຍ້ອນປັນຍາເປັນເຄື່ອງຕັດສະຣູ້ທີ່ເປັນປັດຈຸບັນ ແຕ່ບໍ່ກຳນົດຮູ້ທຸກ ໆລໆ ຈະເລີນມັກດ້ວຍປັນຍາເປັນເຄື່ອງຕັດສະຣູ້ທີ່ເປັນປັດຈຸບັນນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

[໓໙໙] ສກ. ຊື່ວ່າພຸດທະ ຍ້ອນປັນຍາເປັນເຄື່ອງຕັດສະຣູ້ທີ່ເປັນອະດີດ ອະນາຄົດ ແລະ ປັດຈຸບັນແມ່ນບໍ?

ປຣ. ແມ່ນ

ສກ. ຊື່ວ່າພຸດທະ ຍ້ອນປັນຍາເປັນເຄື່ອງຕັດສະຣູ້ ໓ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ຊື່ວ່າພຸດທະ ຍ້ອນປັນຍາເປັນເຄື່ອງຕັດສະຣູ້ ໓ ຢ່າງແມ່ນບໍ?

ປຣ. ແມ່ນ

ສກ. ພຣະພຸດທະ ບໍລິບູນ ໝັ້ນຄົງ ດ້ວຍປັນຍາເປັນເຄື່ອງຕັດສະຣູ້ ໓ ຢ່າງເນືອງ ໆ ສະໝ່ຳສະເໝີ ບໍ່ປະປົນກັນ ປັນຍາເປັນເຄື່ອງຕັດສະຣູ້ ໓ ຢ່າງຜາກົດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ປຣ. ທ່ານບໍ່ຍອມຮັບວ່າ "ຊື່ວ່າພຸດທະ ຍ້ອນປັນຍາເປັນເຄື່ອງຕັດສະຣູ້" ແມ່ນບໍ?

ສກ. ແມ່ນ

ປຣ. ຊື່ວ່າພຸດທະ ຍ້ອນໄດ້ປັນຍາເປັນເຄື່ອງຕັດສະຣູ້ບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກຊື່ວ່າພຸດທະ ຍ້ອນໄດ້ປັນຍາເປັນເຄື່ອງຕັດສະຣູ້ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ຊື່ວ່າພຸດທະ ຍ້ອນປັນຍາເປັນເຄື່ອງຕັດສະຣູ້"

ສກ. ຊື່ວ່າພຸດທະ ຍ້ອນໄດ້ປັນຍາເປັນເຄື່ອງຕັດສະຣູ້ ຍ້ອນເຫດນັ້ນ ຈຶ່ງຊື່ວ່າພຸດທະ ຍ້ອນປັນຍາເປັນເຄື່ອງຕັດສະຣູ້ແມ່ນບໍ?

ປຣ. ແມ່ນ

ສກ. ຊື່ວ່າໂພທິ ຍ້ອນໄດ້ປັນຍາເປັນເຄື່ອງຕັດສະຣູ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

**ໂພທິຍາພຸດໂທຕິກະຖາ ຈົບ**

# ໗. ລັກຂະນະກະຖາ (໓໙)

## ວ່າດ້ວຍລັກສະນະ

[໔໐໐] ສກ. ຜູ້ບໍລິບູນດ້ວຍພຣະລັກສະນະເປັນພຣະໂພທິສັດແມ່ນບໍ?

ປຣ. ແມ່ນ

ສກ. ຜູ້ບໍລິບູນດ້ວຍພຣະລັກສະນະບາງສ່ວນ ເປັນພຣະໂພທິສັດບາງສ່ວນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຜູ້ບໍລິບູນດ້ວຍພຣະລັກສະນະເປັນພຣະໂພທິສັດແມ່ນບໍ?

ປຣ. ແມ່ນ

ສກ. ຜູ້ບໍລິບູນດ້ວຍພຣະລັກສະນະ ໓ ສ່ວນ ເປັນພຣະໂພທິສັດ ໓ ສ່ວນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຜູ້ບໍລິບູນດ້ວຍພຣະລັກສະນະເປັນພຣະໂພທິສັດແມ່ນບໍ?

ປຣ. ແມ່ນ

ສກ. ຜູ້ບໍລິບູນດ້ວຍພຣະລັກສະນະເຄິ່ງໜຶ່ງ ເປັນພຣະໂພທິສັດເຄິ່ງໜຶ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຜູ້ບໍລິບູນດ້ວຍພຣະລັກສະນະເປັນພຣະໂພທິສັດແມ່ນບໍ?

ປຣ. ແມ່ນ

ສກ. ພຣະເຈົ້າຈັກກະພັດເປັນຜູ້ບໍລິບູນດ້ວຍພຣະລັກສະນະ ພຣະເຈົ້າຈັກກະພັດກໍເປັນພຣະໂພທິສັດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະເຈົ້າຈັກກະພັດເປັນຜູ້ບໍລິບູນດ້ວຍພຣະລັກສະນະ ພຣະເຈົ້າຈັກກະພັດກໍເປັນພຣະໂພທິສັດແມ່ນບໍ?

ປຣ. ແມ່ນ

ສກ. ບຸຣະພະປະໂຍຄະ ບຸຣະພະຈະຣິຍາ ການບອກກ່າວທຳ ການສະແດງທຳຂອງພຣະໂພທິສັດເປັນແນວໃດ ບຸຣະພະປະໂຍຄະ ບຸຣະພະຈະຣິຍາ ການບອກກ່າວທຳ ການສະແດງທຳ ຂອງພຣະເຈົ້າຈັກກະພັດກໍເປັນເຊັ່ນນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໐໑] ສກ. ເມື່ອພຣະໂພທິສັດປະສູດ ໝູ່ເທວະດາຮັບກ່ອນ ໝູ່ມະນຸດຮັບພາຍຫຼັງສັນໃດ ເມື່ອພຣະເຈົ້າຈັກກະພັດປະສູດ ໝູ່ເທວະດາຮັບກ່ອນ ໝູ່ມະນຸດຮັບພາຍຫຼັງ ສັນນັ້ນຄືກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອພຣະໂພທິສັດປະສູດ ເທບພະບຸດ ໔ ອົງ ຮັບພຣະໂພທິສັດນັ້ນແລ້ວວາງ ໄວ້ກົງພຣະພັກຂອງພຣະມານດາ ແລ້ວທູນວ່າ "ຂ້າແຕ່ພຣະເທວີ ຂໍພະອົງຈົ່ງພໍພຣະຫະໄທເທີ້ນ ພຣະໂອຣົດຜູ້ມີສັກໃຫຍ່ຂອງພະອົງປະສູດແລ້ວ" ສັນໃດ ເມື່ອພຣະເຈົ້າຈັກກະພັດ ປະສູດເທບພະບຸດ ໔ ອົງ ຮັບພຣະເຈົ້າຈັກກະພັດນັ້ນແລ້ວວາງໄວ້ກົງພຣະພັກຂອງພຣະມານດາ ແລ້ວທູນວ່າ "ຂ້າແຕ່ພຣະເທວີ ຂໍພະອົງຈົ່ງພໍພຣະຫະໄທເທີ້ນ ພຣະໂອຣົດຜູ້ມີສັກໃຫຍ່ຂອງພະອົງປະສູດແລ້ວ" ສັນນັ້ນຄືກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອພຣະໂພທິສັດປະສູດ ທານນ້ຳທັງ ໒ ຄື ທານນ້ຳເຢັນແລະທານນ້ຳຮ້ອນ ໄຫຼລົງຈາກອາກາດ ຊົນທັງຫຼາຍອາບພຣະໂພທິສັດແລະພຣະມານດາ ສັນໃດ ເມື່ອພຣະເຈົ້າຈັກກະພັດປະສູດ ທານນ້ຳທັງ ໒ ຄື ທານນ້ຳເຢັນແລະທານນ້ຳຮ້ອນໄຫຼລົງຈາກອາກາດ ຊົນທັງຫຼາຍອາບພຣະເຈົ້າຈັກກະພັດ ແລະພຣະມານດາ ສັນນັ້ນຄືກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະໂພທິສັດພໍປະສູດແລ້ວດ່ຽວນັ້ນ ປະທັບຢືນດ້ວຍພຣະບາດທັງສອງ ອັນຮາບພຽງ ຫັນພຣະພັກສູ່ທິດເໜືອ ດຳເນີນໄປໄດ້ ໗ ກ້າວ ມີສະເທວດຕະສັດຂາວກັ້ງຕາມໄປ ຊົງແລເບິ່ງທິດທັງປວງ ແລະເປ່ງອາສະພິວາຈາວ່າ "ເຮົາເປັນຜູ້ເລີດໃນໂລກ ເຮົາເປັນໃຫຍ່ໃນໂລກ ເຮົາເປັນຜູ້ປະເສີດໃນໂລກ ນີ້ເປັນຊາດສຸດທ້າຍ ບັດນີ້ ພົບໃໝ່ບໍ່ມີອີກ" ສັນໃດ ພຣະເຈົ້າຈັກກະພັດພໍປະສູດແລ້ວດ່ຽວນັ້ນ ປະທັບຢືນດ້ວຍພຣະບາດທັງສອງອັນຮາບພຽງ ຫັນພຣະພັກສູ່ທິດເໜືອ ດຳເນີນໄປໄດ້ ໗ ກ້າວ ມີສະເທວດຕະສັດຂາວກັ້ນຕາມໄປ ຊົງແລເບິ່ງທິດທັງປວງ ແລະເປ່ງອາສະພິວາຈາວ່າ "ເຮົາເປັນຜູ້ເລີດໃນໂລກ ເຮົາເປັນໃຫຍ່ໃນໂລກ ເຮົາເປັນຜູ້ປະເສີດໃນໂລກ ນີ້ເປັນຊາດສຸດທ້າຍ ບັດນີ້ພົບໃໝ່ບໍ່ມີອີກ" ສັນນັ້ນຄືກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອພຣະໂພທິສັດປະສູດຍ່ອມຜາກົດແສງສະຫວ່າງຣັດສະໝີອັນເຈີດຈ້າ ແຜ່ນດິນໄຫວ ຢ່າງສະທ້ານສະເທືອນ ສັນໃດ ເມື່ອພຣະເຈົ້າຈັກກະພັດປະສູດກໍຍ່ອມຜາກົດແສງສະຫວ່າງ ຣັດສະໝີອັນເຈີດຈ້າ ແຜ່ນດິນໄຫວຢ່າງສະທ້ານສະເທືອນ ສັນນັ້ນຄືກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະກາຍຕາມປົກກະຕິຂອງພຣະໂພທິສັດ ສາຍພຣະຣັດສະໝີອອກໄປວາໜຶ່ງໂດຍຮ້ອບ ສັນໃດ ພຣະກາຍຕາມປົກກະຕິຂອງພຣະເຈົ້າຈັກກະພັດກໍສາຍພຣະຣັດສະໝີອອກໄປວາໜຶ່ງໂດຍຮ້ອບ ສັນນັ້ນຄືກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະໂພທິສັດຊົງມະຫາສຸບິນ ສັນໃດ ພຣະເຈົ້າຈັກກະພັດກໍຊົງມະຫາສຸບິນ ສັນນັ້ນ ຄືກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໔໐໘] ປຣ. ທ່ານບໍ່ຍອມຮັບວ່າ "ຜູ້ບໍລິບູນດ້ວຍພຣະລັກສະນະເປັນພຣະໂພທິສັດ"ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ມະຫາບຸຣຸດສົມບູນດ້ວຍລັກສະນະ ໓໒ ປະການ ມີຄະຕິພຽງ ໒ ຢ່າງເທົ່ານັ້ນ ບໍ່ເປັນຢ່າງອື່ນ ຄື

໑. ຖ້າຢູ່ຄອງເຮືອນຈະໄດ້ເປັນພຣະເຈົ້າຈັກພັດຜູ້ຊົງທຳ ຄອງຣາດໂດຍທຳ ຊົງເປັນໃຫຍ່ໃນແຜ່ນດິນມີມະຫາສະມຸດທັງ ໔ ເປັນຂອບເຂດ ຊົງໄດ້ຮັບໄຊຊະນະ ມີພຣະຣາດຊະອານາຈັກ ໝັ້ນຄົງ ສົມບູນດ້ວຍແກ້ວ ๗ ປະການ ຄື (໑) ຈັກກະແກ້ວ (໒) ຊ້າງແກ້ວ (໓) ມ້າແກ້ວ (໔) ມະນີແກ້ວ (໕) ນາງແກ້ວ (໖) ຄະຫະບໍດີແກ້ວ (๗) ປະຣິນາຍົກແກ້ວ ມີພຣະຣາດຊະໂອຣົດຫຼາຍກວ່າ ໑,໐໐໐ ອົງ ເຊິ່ງລ້ວນແຕ່ກ້າຫານ ມີຮູບຊົງສົມເປັນວີຣະກະສັດ ສາມາດບີບຄັ້ນຣາດຊະສັດຕູໄດ້ ພຣະອົງຊົງຊະນະໂດຍທຳ ບໍ່ຕ້ອງໃຊ້ອາດຍາ ບໍ່ຕ້ອງໃຊ້ອາວຸດ ປົກຄອງແຜ່ນດິນນີ້ມີສາຄອນເປັນຂອບເຂດ

໒. ຖ້າອອກຈາກເຮືອນບວດເປັນບັນພະຊິດຈະໄດ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ຜູ້ບໍ່ມີກິເລດໃນໂລກ"

ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ຜູ້ບໍລິບູນດ້ວຍພຣະລັກສະນະຈຶ່ງເປັນພຣະໂພທິສັດໄດ້

**ລັກຂະນະກະຖາ ຈົບ**

# ๓. ນິຍາໂມກກັນຕິກະຖາ (໔໐)

## ວ່າດ້ວຍການຢັ່ງລົງສູ່ນິຍາມ

[໔໐໓] ສກ. ພຣະໂພທິສັດຢັ່ງລົງສູ່ນິຍາມ ປະພຶດພົມມະຈັນ ແລ້ວໃນສາດສະໜາຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂພທິສັດເປັນສາວົກຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ພຣະໂພທິສັດເປັນສາວົກຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະແມ່ນບໍ?

ປຣ. ແມ່ນ

ສກ. ເປັນສາວົກແລ້ວຈຶ່ງເປັນພຣະພຸດທະເຈົ້າແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ເປັນສາວົກແລ້ວຈຶ່ງເປັນພຣະພຸດທະເຈົ້າແມ່ນບໍ?

ປຣ. ແມ່ນ

ສກ. ເປັນຜູ້ຕັດສະຣູ້ດ້ວຍການຮັບຟັງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ເປັນຜູ້ຕັດສະຣູ້ດ້ວຍການຮັບຟັງແມ່ນບໍ?

ປຣ. ແມ່ນ

ສກ. ພຣະຜູ້ມີພຣະພາກເຈົ້າຊົງເປັນພຣະສະຍຳພູບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະຜູ້ມີພຣະພາກເຈົ້າຊົງເປັນພຣະສະຍຳພູ ທ່ານກໍບໍ່ຄວນຍອມຮັບວ່າ "ພຣະຜູ້ມີພຣະພາກເຈົ້າເປັນຜູ້ຕັດສະຣູ້ດ້ວຍການຮັບຟັງ"

ສກ. ພຣະໂພທິສັດຢັ່ງລົງສູ່ນິຍາມ ປະພຶດພົມມະຈັນແລ້ວໃນສາດສະໜາຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະແມ່ນບໍ?

ປຣ. ແມ່ນ

ສກ. ພຣະຜູ້ມີພຣະພາກເຈົ້າຕັດສະຣູ້ສາມັນຍະຜົນພຽງ ໓ ເທົ່ານັ້ນ ຢູ່ໃຕ້ຕົ້ນໂພແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ພຣະຜູ້ມີພຣະພາກເຈົ້າຕັດສະຣູ້ສາມັນຍະຜົນ ໔ ຢູ່ໃຕ້ຕົ້ນໂພແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະຜູ້ມີພຣະພາກເຈົ້າຕັດສະຣູ້ສາມັນຍະຜົນ ໔ ຢູ່ໃຕ້ຕົ້ນໂພ ທ່ານກໍບໍ່ຄວນຍອມຮັບວ່າ "ພຣະໂພທິສັດຢັ່ງລົງສູ່ນິຍາມ ປະພຶດພົມມະຈັນແລ້ວໃນສາດສະໜາຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ"

[໔໐໔] ສກ. ພຣະໂພທິສັດຢັ່ງລົງສູ່ນິຍາມ ປະພຶດພົມມະຈັນແລ້ວໃນສາດສະໜາຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂພທິສັດໄດ້ເຮັດທຸກກະຣະກິຣິຍາ (ການເຮັດຄວາມພຽນທີ່ຄົນທົ່ວໄປເຮັດໄດ້ຍາກ) ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ເຖິງພ້ອມດ້ວຍທັດສະນະ(ໂສດາປັດຕິມັກ) ຈຶ່ງເຮັດທຸກກະຣະກິຣິຍາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະໂພທິສັດໄດ້ພໍາເພັງຕະບະຢ່າງອື່ນແລະນັບຖືສາດສະດາອື່ນ ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ເຖິງພ້ອມດ້ວຍທັດສະນະຈະເພິ່ງນັບຖືສາດສະດາອື່ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ທ່ານພຣະອານົນຢັ່ງລົງສູ່ນິຍາມ ປະພຶດພົມມະຈັນແລ້ວໃນສາດສະໜາຂອງພຣະຜູ້ມີພຣະພາກເຈົ້າ (ດັ່ງນັ້ນ) ທ່ານພຣະອານົນ ຈຶ່ງເປັນສາວົກຂອງພຣະຜູ້ມີພຣະພາກເຈົ້າ ແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂພທິສັດຢັ່ງລົງສູ່ນິຍາມ ປະພຶດພົມມະຈັນແລ້ວໃນສາດສະໜາຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ກັດສະປະ (ດັ່ງນັ້ນ) ພຣະໂພທິສັດຈຶ່ງເປັນສາວົກຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ທ່ານຈິດຕະຄະຫະບໍດີ ທ່ານຫັດຖະກະຊາວເມືອງອາລະວີ ຢັ່ງລົງສູ່ນິຍາມ ປະພຶດພົມມະຈັນແລ້ວໃນສາດສະໜາຂອງພຣະຜູ້ມີພຣະພາກເຈົ້າ (ດັ່ງນັ້ນ) ຈິດຕະຄະຫະບໍດີ ທ່ານຫັດຖະກະຊາວເມືອງອາລະວີ ຈຶ່ງເປັນສາວົກຂອງພຣະຜູ້ມີພຣະພາກເຈົ້າແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂພທິສັດຢັ່ງລົງສູ່ນິຍາມ ປະພຶດພົມມະຈັນແລ້ວໃນສາດສະໜາຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ (ດັ່ງນັ້ນ) ພຣະໂພທິສັດຈຶ່ງເປັນສາວົກຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະໂພທິສັດຢັ່ງລົງສູ່ນິຍາມ ປະພຶດພົມມະຈັນແລ້ວໃນສາດສະໜາຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ກັດສະປະ ແຕ່ບໍ່ໄດ້ເປັນສາວົກຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະແມ່ນບໍ?

ປຣ. ແມ່ນ

ສກ. ທ່ານພຣະອານົນຢັ່ງລົງສູ່ນິຍາມ ປະພຶດພົມມະຈັນແລ້ວໃນສາດສະໜາຂອງພຣະຜູ້ມີພຣະພາກເຈົ້າ ແຕ່ບໍ່ໄດ້ເປັນສາວົກຂອງພຣະຜູ້ມີພຣະພາກເຈົ້າແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະໂພທິສັດຢັ່ງລົງສູ່ນິຍາມ ປະພຶດພົມມະຈັນແລ້ວໃນສາດສະໜາຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ກັດສະປະ ແຕ່ບໍ່ໄດ້ເປັນສາວົກຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະແມ່ນບໍ?

ປຣ. ແມ່ນ

ສກ. ທ່ານຈິດຕະຄະຫະບໍດີ ທ່ານຫັດຖະກະຊາວເມືອງອາລະວີ ຢັ່ງລົງສູ່ນິຍາມ ປະພຶດພົມມະຈັນແລ້ວໃນສາດສະໜາຂອງພຣະຜູ້ມີພຣະພາກເຈົ້າ ແຕ່ບໍ່ໄດ້ເປັນສາວົກຂອງພຣະຜູ້ມີພຣະພາກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ພຣະໂພທິສັດຢັ່ງລົງສູ່ນິຍາມ ປະພຶດພົມມະຈັນແລ້ວໃນສາດສະໜາຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ ແຕ່ບໍ່ໄດ້ເປັນສາວົກຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະແມ່ນບໍ?

ປຣ. ແມ່ນ

ສກ. ເປັນສາວົກລ່ວງໄປຊາດໜຶ່ງແລ້ວກັບບໍ່ເປັນສາວົກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໔໐໕] ປຣ. ທ່ານບໍ່ຍອມຮັບວ່າ "ພຣະໂພທິສັດຢັ່ງລົງສູ່ນິຍາມ ປະພຶດພົມມະຈັນແລ້ວໃນສາດສະໜາຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ອານົນ ເຮົາໄດ້ປະພຶດພົມມະຈັນແລ້ວໃນພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ ເພື່ອຄວາມຕັດສະຣູ້ໃນອະນາຄົດ" ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ພຣະໂພທິສັດຢັ່ງລົງສູ່ນິຍາມ ປະພຶດພົມມະຈັນແລ້ວໃນສາດສະໜາຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ"

ສກ. ພຣະໂພທິສັດຢັ່ງລົງສູ່ນິຍາມ ປະພຶດພົມມະຈັນແລ້ວໃນສາດສະໜາຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "(ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ເຮົາເປັນຜູ້ຄອບງຳທຳທັງປວງ ຮູ້ທຳທັງປວງ
ບໍ່ໄດ້ເປິເປື້ອນໃນທຳທັງປວງ ລະທຳທັງປວງໄດ້ໝົດສິ້ນ
ລຸດພົ້ນຍ້ອນສິ້ນຕັນຫາ ຕັດສະຣູ້ຍິ່ງເອງ
ແລ້ວຈະເພິ່ງອ້າງໃຜນໍ

ເຮົາບໍ່ມີອາຈານ ເຮົາບໍ່ມີຜູ້ສະເໝີເໝືອນ
ເຮົາບໍ່ມີຜູ້ທັດທຽມໃນໂລກກັບທັງເທວະໂລກ

ຍ້ອນເຮົາເປັນອະຣະຫັນ ເປັນສາດສະດາຜູ້ປະເສີດ
ເປັນຜູ້ຕັດສະຣູ້ຊອບເອງພຽງຜູ້ດຽວ ເປັນຜູ້ເຢືອກເຢັນ

ດັບກິເລດໄດ້ແລ້ວໃນໂລກ
ເຮົາຈະໄປເມືອງຫລວງແຫ່ງຊາວກາສີ ປະກາດທຳມະຈັກ
ຕີກອງອະມະຕະທຳໃຫ້ດັງຂຶ້ນໃນໂລກອັນມືດມົນ

ອຸປະກາຊີວົກຂາບທູນວ່າ "ອາວຸໂສ ທ່ານສົມຄວນເປັນພຣະອະນັນຕະຊິນະຕາມທີ່ທ່ານປະກາດ

ພຣະຜູ້ມີພຣະພາກເຈົ້າຕັດວ່າ

ຊິນເຫຼົ່າໃດໄດ້ເຖິງຄວາມສິ້ນອາສະວະແລ້ວ
ຊິນເຫຼົ່ານັ້ນຍ່ອມເປັນພຣະຊິນະເຊັ່ນດຽວກັບເຮົາ
ອຸປະກະ ເຮົາຊະນະຄວາມຊົ່ວໄດ້ແລ້ວ
ຍ້ອນແນວນັ້ນ ເຮົາຈຶ່ງຊື່ວ່າພຣະຊິນະ"

ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ພຣະໂພທິສັດຢັ່ງລົງສູ່ນິຍາມ ປະພຶດພົມມະຈັນແລ້ວໃນສາດສະໜາຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ"

ສກ. ພຣະໂພທິສັດຢັ່ງລົງສູ່ນິຍາມ ປະພຶດພົມມະຈັນແລ້ວໃນສາດສະໜາຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວໃນທຳທັງຫຼາຍທີ່ເຮົາບໍ່ເຄີຍສະດັບມາກ່ອນວ່າ "ນີ້ທຸກຂະອະຣິຍະສັດ

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຯລຯ ແສ່ງສະຫວ່າງເກີດຂຶ້ນແລ້ວໃນທຳທັງຫຼາຍທີ່ເຮົາບໍ່ເຄີຍສະດັບມາກ່ອນວ່າ "ທຸກຂະອະຣິຍະສັດນີ້ ຄວນກຳນົດຣູ້ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວໃນທຳທັງຫຼາຍທີ່ເຮົາບໍ່ເຄີຍສະດັບມາກ່ອນວ່າ "ທຸກຂະອະຣິຍະສັດນີ້ ເຮົາໄດ້ກຳນົດຣູ້ແລ້ວ"

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວໃນທຳທັງຫຼາຍທີ່ເຮົາບໍ່ເຄີຍສະດັບມາກ່ອນວ່າ "ນີ້ທຸກຂະສະມຸທະຍະອະຣິຍະສັດ

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວໃນທຳທັງຫຼາຍທີ່ເຮົາບໍ່ເຄີຍສະດັບມາກ່ອນວ່າ "ທຸກຂະສະມຸທະຍະອະຣິຍະສັດນີ້ ຄວນລະ"

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວໃນທຳທັງຫຼາຍທີ່ເຮົາບໍ່ເຄີຍສະດັບມາກ່ອນວ່າ "ທຸກຂະສະມຸທະຍະອະຣິຍະສັດ ເຮົາລະໄດ້ແລ້ວ

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວໃນທຳທັງຫຼາຍທີ່ເຮົາບໍ່ເຄີຍສະດັບມາກ່ອນວ່າ "ນີ້ທຸກຂະນິໂຣທະອະຣິຍະສັດ"

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວໃນທຳທັງຫຼາຍທີ່ເຮົາບໍ່ເຄີຍສະດັບມາກ່ອນວ່າ "ທຸກຂະນິໂຣທະອະຣິຍະສັດນີ້ ຄວນເຮັດໃຫ້ແຈ້ງ"

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວໃນທຳທັງຫຼາຍທີ່ເຮົາບໍ່ເຄີຍສະດັບມາກ່ອນວ່າ "ທຸກຂະນິໂຣທະອະຣິຍະສັດ ເຮົາໄດ້ເຮັດໃຫ້ແຈ້ງແລ້ວ

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວໃນທຳທັງຫຼາຍທີ່ເຮົາບໍ່ເຄີຍສະດັບມາກ່ອນວ່າ "ນີ້ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ"

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວໃນທຳທັງຫຼາຍທີ່ເຮົາບໍ່ເຄີຍສະດັບມາກ່ອນວ່າ "ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດນີ້ ຄວນໃຫ້ຈະເລີນ"

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວໃນທຳທັງຫຼາຍທີ່ເຮົາບໍ່ເຄີຍສະດັບມາກ່ອນວ່າ ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດນີ້ ເຮົາໄດ້ເຮັດໃຫ້ຈະເລີນແລ້ວ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ພຣະໂພທິສັດຢັ່ງລົງສູ່ນິຍາມ ປະພຶດພົມມະຈັນແລ້ວໃນສາດສະໜາຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ"

**ນິຍາໂມກກັນຕິກະຖາ ຈົບ**

## ໗. ອຸປະຣາປີສະມັນນາກະຕະກະຖາ (໔໑)

## ວ່າດ້ວຍຜູ້ບໍລິບູນອີກເລື້ອງໜຶ່ງ

[໔໐໗] ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນເປັນຜູ້ບໍລິບູນດ້ວຍຜົນ ໓ ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນເປັນຜູ້ບໍລິບູນດ້ວຍຜັດສະ ໔ ຯລຯ ເວທະນາ ໔ ຯລຯ ສັນຍາ ໔ ຯລຯ ເຈຕະນາ ໔ ຯລຯ ຈິດ ໔ ຯລຯ ສັດທາ ໔ ຯລຯ ວິຣິຍະ ໔ ຯລຯ ສະຕິ ໔ ຯລຯ ສະມາທິ ໔ ຯລຯ ປັນຍາ ໔ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນເປັນຜູ້ບໍລິບູນດ້ວຍຜົນ ໔ ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນເປັນຜູ້ບໍລິບູນດ້ວຍຜັດສະ ๓ ຯລຯ ເວທະນາ ๓ ຯລຯ ປັນຍາ ๓ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມິຜົນເປັນຜູ້ບໍລິບູນດ້ວຍໂສດາປັດຕິຜົນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມິຜົນ ເປັນຜູ້ບໍລິບູນດ້ວຍຜັດສະ ໔ ຯລຯ ເວທະນາ ໔ ຯລຯ ປັນຍາ ໔ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ເປັນຜູ້ບໍລິບູນດ້ວຍໂສດາປັດຕິຜົນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ເປັນພຣະໂສດາບັນຜູ້ສັດຕັກຂັດຕຸປະຣະມະ ໂກລັງໂກລະ ເອກະພີຊີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ເປັນຜູ້ບໍລິບູນດ້ວຍສະກະທາຄາມິຜົນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ເປັນພຣະສະກະທາຄາມິແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ເປັນຜູ້ບໍລິບູນດ້ວຍອະນາຄາມິຜົນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ເປັນພຣະອະນາຄາມິຜູ້ອັນຕະຣາປະຣິນິບພາຍີ ອຸປະຫັດຈະປະຣິນິບພາຍີ ອະສັງຂາຣະປະຣິນິບພາຍີ ສະສັງຂາຣະປະຣິນິບພາຍີ ອຸດທັງໂສໂຕອະກະນິດຖະຄາມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ ເປັນຜູ້ບໍລິບູນດ້ວຍໂສດາປັດຕິຜົນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ ເປັນພຣະໂສດາບັນຜູ້ສັດຕັກຂັດຕຸປະຣະມະ ໂກລັງໂກລະ ເອກະພີຊີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ ເປັນຜູ້ບໍລິບູນດ້ວຍສະກະທາຄາມິຜົນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ ເປັນພຣະສະກະທາຄາມີ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມິຜົນ ເປັນຜູ້ບໍລິບູນດ້ວຍໂສດາປັດຕິຜົນ ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມິຜົນ ເປັນພຣະໂສດາບັນຜູ້ສັດຕັກຂັດຕຸປະຣະມະ ໂກລັງໂກລະ ເອກະພີຊີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໐໗] ສກ. ບຸກຄົນຜູ້ບໍລິບູນດ້ວຍໂສດາປັດຕິຜົນ ທ່ານຍອມຮັບວ່າ "ເປັນພຣະໂສດາບັນ" ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ເປັນຜູ້ບໍລິບູນດ້ວຍໂສດາປັດຕິຜົນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ກັບພຣະໂສດາບັນເປັນຄົນຄົນດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ບໍລິບູນດ້ວຍສະກະທາຄາມິຜົນ ທ່ານຍອມຮັບວ່າ "ເປັນພຣະສະກະທາຄາມີ" ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ເປັນຜູ້ບໍລິບູນດ້ວຍສະກະທາຄາມິຜົນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ກັບພຣະສະກະທາຄາມີເປັນຄົນຄົນດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຜູ້ບໍລິບູນດ້ວຍອະນາຄາມິຜົນ ທ່ານຍອມຮັບວ່າ "ເປັນພຣະອະນາຄາມີ" ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ເປັນຜູ້ບໍລິບູນດ້ວຍອະນາຄາມິຜົນ ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ກັບພຣະອະນາຄາມີເປັນຄົນຄົນດຽວກັນ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຜູ້ບໍລິບູນດ້ວຍໂສດາປັດຕິຜົນ ທ່ານຍອມຮັບວ່າ "ເປັນພຣະໂສດາບັນ" ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ ເປັນຜູ້ບໍລິບູນດ້ວຍໂສດາປັດຕິຜົນ ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນກັບພຣະໂສດາບັນເປັນຄົນຄົນດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຜູ້ບໍລິບູນດ້ວຍສະກະທາຄາມິຜົນ ທ່ານຍອມຮັບວ່າ "ເປັນພຣະສະກະທາຄາມີ" ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ ເປັນຜູ້ບໍລິບູນດ້ວຍສະກະທາຄາມິຜົນ ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ ກັບພຣະສະກະທາຄາມີເປັນຄົນຄົນດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຜູ້ບໍລິບູນດ້ວຍໂສດາປັດຕິຜົນ ທ່ານຍອມຮັບວ່າ "ເປັນພຣະໂສດາບັນ" ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມິຜົນ ເປັນຜູ້ບໍລິບູນດ້ວຍໂສດາປັດຕິຜົນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມິຜົນ ກັບພຣະໂສດາບັນເປັນຄົນຄົນດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໐໗] ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ເປັນຜູ້ບໍລິບູນດ້ວຍໂສດາປັດຕິຜົນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ລ່ວງເລີຍໂສດາປັດຕິຜົນໄປແລ້ວບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ລ່ວງເລີຍໂສດາປັດຕິຜົນໄປແລ້ວ ທ່ານກໍບໍ່ຄວນຍອມຮັບວ່າ "ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ເປັນຜູ້ບໍລິບູນດ້ວຍໂສດາປັດຕິຜົນ"

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ລ່ວງເລີຍໂສດາປັດຕິຜົນໄປແລ້ວຍັງເປັນຜູ້ບໍລິບູນດ້ວຍໂສດາປັດຕິຜົນນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ລ່ວງເລີຍໂສດາປັດຕິມັກໄປແລ້ວ ລ່ວງເລີຍສັກກາຍະທິດຖິ ວິຈິກິດສາ ສີລັບພະຕະປະຣາມາດ ຣາຄະ ໂທສະ ໂມຫະ ທີ່ເປັນເຫດໃຫ້ສັດໄປສູ່ອະບາຍໄດ້ແລ້ວ ເປັນຜູ້ບໍລິບູນດ້ວຍສະພາວະທຳມີສັກກາຍະທິດຖິເປັນຕົ້ນນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ເປັນຜູ້ບໍລິບູນດ້ວຍສະກະທາຄາມິຜົນ ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ລ່ວງເລີຍສະກະທາຄາມິຜົນໄປແລ້ວບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ລ່ວງເລີຍສະກະທາຄາມິຜົນໄປແລ້ວ ທ່ານກໍບໍ່ຄວນຍອມຮັບວ່າ "ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນເປັນຜູ້ບໍລິບູນດ້ວຍສະກະທາຄາມິຜົນ"

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ລ່ວງເລີຍສະກະທາຄາມິຜົນໄປແລ້ວ ເປັນຜູ້ບໍລິບູນດ້ວຍສະກະທາຄາມິຜົນນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ລ່ວງເລີຍສະກະທາຄາມິມັກໄປແລ້ວ ລ່ວງເລີຍກາມຣາຄະຢ່າງຫຍາບ ພະຍາບາດຢ່າງຫຍາບໄດ້ແລ້ວ ເປັນຜູ້ບໍລິບູນດ້ວຍກາມຣາຄະແລະພະຍາບາດນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ເປັນຜູ້ບໍລິບູນດ້ວຍອະນາຄາມິຜົນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ລ່ວງເລີຍອະນາຄາມິຜົນໄປແລ້ວບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ລ່ວງເລີຍອະນາຄາມິຜົນໄປແລ້ວ ທ່ານກໍບໍ່ຄວນຍອມຮັບວ່າ "ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນເປັນຜູ້ບໍລິບູນດ້ວຍອະນາຄາມິຜົນ"

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ລ່ວງເລີຍອະນາຄາມິຜົນໄປແລ້ວ ເປັນຜູ້ບໍລິບູນດ້ວຍອະນາຄາມິຜົນນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ລ່ວງເລີຍອະນາຄາມິມັກໄປແລ້ວ ລ່ວງເລີຍກາມຣາຄະຢ່າງລະອຽດ ພະຍາບາດຢ່າງລະອຽດໄດ້ແລ້ວ ເປັນຜູ້ບໍລິບູນດ້ວຍກາມຣາຄະແລະພະຍາບາດນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໐໗] ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ ເປັນຜູ້ບໍລິບູນດ້ວຍໂສດາປັດຕິຜົນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ ລ່ວງເລີຍໂສດາປັດຕິຜົນໄປແລ້ວບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ ລ່ວງເລີຍໂສດາປັດຕິຜົນໄປແລ້ວ ທ່ານບໍ່ຄວນຍອມຮັບວ່າ "ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ ເປັນຜູ້ບໍລິບູນດ້ວຍໂສດາປັດຕິຜົນ"

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ ລ່ວງເລີຍໂສດາປັດຕິຜົນໄປແລ້ວ ເປັນຜູ້ບໍລິບູນດ້ວຍໂສດາປັດຕິຜົນນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ ລ່ວງເລີຍໂສດາປັດຕິມັກໄປແລ້ວ ລ່ວງເລີຍສັກກາຍະທິດຖິ ຯລຯ ລ່ວງເລີຍໂມຫະທີ່ເປັນເຫດໃຫ້ສັດໄປສູ່ອະບາຍໄດ້ແລ້ວເປັນຜູ້ບໍລິບູນດ້ວຍສະພາວະທຳມີສັກກາຍະທິດຖິເປັນຕົ້ນນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ ເປັນຜູ້ບໍລິບູນດ້ວຍສະກະທາຄາມິຜົນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ ລ່ວງເລີຍສະກະທາຄາມິຜົນໄປແລ້ວບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ ລ່ວງເລີຍສະກະທາຄາມິຜົນໄປແລ້ວ ທ່ານບໍ່ຄວນຍອມຮັບວ່າ "ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ ເປັນຜູ້ບໍລິບູນດ້ວຍສະກະທາຄາມິຜົນ"

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ ລ່ວງເລີຍສະກະທາຄາມິຜົນໄປແລ້ວ ເປັນຜູ້ບໍລິບູນດ້ວຍສະກະທາຄາມິຜົນນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ ລ່ວງເລີຍສະກະທາຄາມິມັກໄປແລ້ວ ລ່ວງເລີຍກາມຣາຄະຢ່າງຫຍາບ ພະຍາບາດຢ່າງຫຍາບໄດ້ແລ້ວ ເປັນຜູ້ບໍລິບູນດ້ວຍກາມຣາຄະແລະພະຍາບາດນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໑໐] ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມິຜົນ ເປັນຜູ້ບໍລິບູນດ້ວຍໂສດາປັດຕິຜົນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມິຜົນ ລ່ວງເລີຍໂສດາປັດຕິຜົນໄປ ແລ້ວບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມິຜົນ ລ່ວງເລີຍໂສດາປັດຕິຜົນໄປແລ້ວ ທ່ານບໍ່ຄວນຍອມຮັບວ່າ "ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມິຜົນ ເປັນຜູ້ບໍລິບູນດ້ວຍໂສດາປັດຕິຜົນ"

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມິຜົນ ລ່ວງເລີຍໂສດາປັດຕິຜົນໄປແລ້ວ ເປັນຜູ້ບໍລິບູນດ້ວຍໂສດາປັດຕິຜົນນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມິຜົນ ລ່ວງເລີຍໂສດາປັດຕິມັກໄປແລ້ວ ລ່ວງເລີຍສັກກາຍະທິດຖິ ຯລຯ ລ່ວງເລີຍໂມຫະທີ່ເປັນເຫດໃຫ້ສັດໄປສູ່ອະບາຍໄດ້ແລ້ວ ເປັນຜູ້ບໍລິບູນດ້ວຍສະພາວະທຳມີສັກກາຍະທິດຖິເປັນຕົ້ນນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໑໑] ປຣ. ທ່ານບໍ່ຍອມຮັບວ່າ "ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ເປັນຜູ້ບໍລິບູນດ້ວຍຜົນ ໓" ແມ່ນບໍ?

ສກ. ແມ່ນ

ປຣ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນໄດ້ຜົນ ໓ ແລ້ວ ບໍ່ເສື່ອມຈາກຜົນ ໓ ນັ້ນບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນໄດ້ຜົນ ໓ ແລ້ວ ແລະບໍ່ເສື່ອມຈາກຜົນ ໓ ນັ້ນ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ເປັນຜູ້ບໍລິບູນດ້ວຍຜົນ ໓"

ປຣ. ທ່ານບໍ່ຍອມຮັບວ່າ "ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ ເປັນຜູ້ບໍລິບູນດ້ວຍຜົນ ໒" ແມ່ນບໍ?

ສກ. ແມ່ນ

ປຣ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນໄດ້ຜົນ ໒ ແລ້ວ ແລະບໍ່ເສື່ອມຈາກຜົນ ໒ ນັ້ນບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນໄດ້ຜົນ ໒ ແລ້ວ ແລະບໍ່ເສື່ອມຈາກຜົນ ໒ ນັ້ນ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ ເປັນຜູ້ບໍລິບູນດ້ວຍຜົນ ໒"

ປຣ. ທ່ານບໍ່ຍອມຮັບວ່າ "ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມີຜົນ ເປັນຜູ້ບໍລິບູນດ້ວຍໂສດາປັດຕິຜົນ" ແມ່ນບໍ?

ສກ. ແມ່ນ

ປຣ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມີຜົນໄດ້ໂສດາປັດຕິຜົນແລ້ວ ແລະບໍ່ເສື່ອມຈາກໂສດາປັດຕິຜົນນັ້ນບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມີຜົນໄດ້ໂສດາປັດຕິຜົນແລ້ວ ແລະບໍ່ເສື່ອມຈາກໂສດາປັດຕິຜົນນັ້ນ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມີຜົນ ເປັນຜູ້ບໍລິບູນດ້ວຍໂສດາປັດຕິຜົນ"

[໔໑໘] ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນໄດ້ຜົນ ໓ ແລ້ວ ແລະບໍ່ເສື່ອມຈາກຜົນ ໓ ນັ້ນ ດັ່ງນັ້ນ ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ຈຶ່ງເປັນຜູ້ບໍລິບູນດ້ວຍຜົນ ໓ ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນໄດ້ມັກ ໔ ແລ້ວ ແລະບໍ່ເສື່ອມຈາກ ມັກ ໔ ນັ້ນ ດັ່ງນັ້ນ ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ຈຶ່ງເປັນຜູ້ບໍລິບູນດ້ວຍມັກ ໔ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມີຜົນໄດ້ຜົນ ໒ ແລ້ວ ແລະບໍ່ເສື່ອມຈາກຜົນ ໒ ນັ້ນ ດັ່ງນັ້ນ ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມີຜົນ ຈຶ່ງເປັນຜູ້ບໍລິບູນດ້ວຍຜົນ ໒ ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມີຜົນໄດ້ມັກ ໓ ແລ້ວ ແລະບໍ່ເສື່ອມຈາກມັກ ໓ ນັ້ນ ດັ່ງນັ້ນ ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມີຜົນ ຈຶ່ງເປັນຜູ້ບໍລິບູນດ້ວຍມັກ ໓ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມີຜົນໄດ້ໂສດາປັດຕິຜົນແລ້ວ ແລະບໍ່ເສື່ອມ ຈາກໂສດາປັດຕິຜົນນັ້ນ ດັ່ງນັ້ນ ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມີຜົນຈຶ່ງເປັນຜູ້ບໍລິບູນດ້ວຍໂສດາປັດຕິຜົນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມິຜົນໄດ້ມັກ ໘ ແລ້ວ ແລະບໍ່ເສື່ອມຈາກມັກ ໘ ນັ້ນ ດັ່ງນັ້ນ ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມິຜົນ ຈຶ່ງເປັນຜູ້ບໍລິບູນດ້ວຍມັກ ໘ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

**ອຸປະຣາປິສະມັນນາກະຕະກະຖາ ຈົບ**

## ໑໐. ສັບພະສັນໂຍຊະນັບປະຫານະກະຖາ (໔໘)

## ວ່າດ້ວຍການລະສັງໂຍດທັງປວງ

[໔໑໓] ສກ. ການລະສັງໂຍດທັງປວງ ເປັນອະຣະຫັດຕະຜົນແມ່ນບໍ?

ປຣ. ແມ່ນ

ສກ. ລະສັງໂຍດທັງປວງໄດ້ດ້ວຍອະຣະຫັດຕະມັກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ລະສັງໂຍດທັງປວງໄດ້ດ້ວຍອະຣະຫັດຕະມັກແມ່ນບໍ?

ປຣ. ແມ່ນ

ສກ. ລະສັກກາຍະທິດຖິ ວິຈິກິດສາ ສີລັບພະຕະປະຣາມາດໄດ້ດ້ວຍອະຣະຫັດຕະມັກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ລະສັກກາຍະທິດຖິ ວິຈິກິດສາ ສີລັບພະຕະປະຣາມາດໄດ້ດ້ວຍອະຣະຫັດຕະມັກແມ່ນບໍ?

ປຣ. ແມ່ນ

ສກ. ການລະສັງໂຍດ ໓ ຢ່າງໄດ້ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນໂສດາປັດຕິຜົນແມ່ນບໍ?

ປຣ. ແມ່ນ

ສກ. ຫາກການລະສັງໂຍດ ໓ ຢ່າງໄດ້ ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນໂສດາປັດຕິຜົນ ທ່ານບໍ່ຍອມຮັບວ່າ "ລະສັງໂຍດທັງປວງໄດ້ດ້ວຍອະຣະຫັດຕະມັກ"

[໔໑໔] ສກ. ລະສັງໂຍດທັງປວງໄດ້ດ້ວຍອະຣະຫັດຕະມັກແມ່ນບໍ?

ປຣ. ແມ່ນ

ສກ. ລະກາມຣາຄະຢ່າງຫຍາບ ພະຍາບາດຢ່າງຫຍາບໄດ້ດ້ວຍອະຣະຫັດຕະມັກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໔໑໕] ສກ. ລະກາມຣາຄະຢ່າງຫຍາບ ພະຍາບາດຢ່າງຫຍາບໄດ້ດ້ວຍອະຣະຫັດຕະມັກແມ່ນບໍ?

ປຣ. ແມ່ນ

ສກ. ຄວາມເບົາບາງແຫ່ງກາມຣາຄະແລະພະຍາບາດ ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນສະກະທາຄາມີຜົນແມ່ນບໍ?

ປຣ. ແມ່ນ

ສກ. ຫາກຄວາມເບົາບາງແຫ່ງກາມຣາຄະ ແລະພະຍາບາດ ພຣະຜູ້ມີພຣະພາກເຈົ້າຕັດວ່າ ເປັນສະກະທາຄາມີຜົນ ທ່ານກໍບໍ່ຄວນຍອມຮັບວ່າ "ລະສັງໂຍດທັງປວງໄດ້ດ້ວຍອະຣະຫັດຕະມັກ"

ສກ. ລະສັງໂຍດທັງປວງໄດ້ດ້ວຍອະຣະຫັດຕະມັກແມ່ນບໍ?

ປຣ. ແມ່ນ

ສກ. ລະກາມຣາຄະຢ່າງລະອຽດ ພະຍາບາດຢ່າງລະອຽດໄດ້ດ້ວຍອະຣະຫັດຕະມັກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໑໖] ສກ. ລະກາມຣາຄະຢ່າງລະອຽດ ພະຍາບາດຢ່າງລະອຽດໄດ້ດ້ວຍອະຣະຫັດຕະມັກແມ່ນບໍ?

ປຣ. ແມ່ນ

ສກ. ການລະກາມຣາຄະ ແລະພະຍາບາດໄດ້ເດັດຂາດ ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນອະນາຄາມີຜົນບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກການລະກາມຣາຄະ ແລະພະຍາບາດໄດ້ເດັດຂາດ ພຣະຜູ້ມີພຣະພາກເຈົ້າຕັດວ່າ ເປັນອະນາຄາມີຜົນ ທ່ານກໍບໍ່ຄວນຍອມຮັບວ່າ "ລະສັງໂຍດທັງປວງໄດ້ດ້ວຍອະຣະຫັດຕະມັກ"

ສກ. ລະສັງໂຍດທັງປວງໄດ້ດ້ວຍອະຣະຫັດຕະມັກແມ່ນບໍ?

ປຣ. ແມ່ນ

ສກ. ການລະຣູບປະຣາຄະ ອະຣູບປະຣາຄະ ມານະ ອຸດທັດຈະ ແລະອະວິດຊາໄດ້ເດັດຂາດພຣະຜູ້ມີພຣະພາກເຈົ້າຕັດວ່າເປັນອະຣະຫັດຕະຜົນບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກການລະຣູບປະຣາຄະ ອະຣູບປະຣາຄະ ມານະ ອຸດທັດຈະ ແລະອະວິດຊາໄດ້ເດັດຂາດ ພຣະຜູ້ມີພຣະພາກເຈົ້າຕັດວ່າ ເປັນອະຣະຫັດຕະຜົນ ທ່ານກໍບໍ່ຄວນຍອມຮັບວ່າ "ລະສັງໂຍດທັງປວງໄດ້ດ້ວຍອະຣະຫັດຕະມັກ"

[໔໑໗] ປຣ. ທ່ານບໍ່ຍອມຮັບວ່າ " ການລະສັງໂຍດທັງປວງ ເປັນອະຣະຫັດຕະຜົນ" ແມ່ນບໍ?

ສກ. ແມ່ນ

ປຣ. ສັງໂຍດທັງປວງ ພຣະອະຣະຫັນລະໄດ້ແລ້ວບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກສັງໂຍດທັງປວງພຣະອະຣະຫັນລະໄດ້ແລ້ວ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ການລະສັງໂຍດທັງປວງ ເປັນອະຣະຫັດຕະຜົນ"

**ສັບພະສັນໂຍຊະນັບປະຫານະກະຖາ ຈົບ**

**ຈະຕຸດຖະວັກ ຈົບ**

## ລວມກະຖາທີ່ມີໃນວັກນີ້ ຄື

໑. ຄິຫິດສະອະຣະຫາຕິກະຖາ
໒. ອະນາສະວະກະຖາ
໓. ອຸເປກຂາສະມັນນາກະຕະກະຖາ
໔. ລັກຂະນະກະຖາ
໕. ອຸປະຣາປິສະມັນນາກະຕະກະຖາ
໖. ອຸປະປັດຕິກະຖາ
໗. ສະມັນນາກະຕະກະຖາ
໘. ໂພທິຍາພຸດໂທຕິກະຖາ
໙. ນິຍາໂມກກັນຕິກະຖາ
໑໐. ສັບພະສັນໂຍຊະນັບປະຫານະກະຖາ

# ៥. ປັນຈະມະວັກ

## ໑. ວິມຸດຕິກະຖາ (໔໓)

### ວ່າດ້ວຍຄວາມລຸດພົ້ນ

[໔໑໘] ສກ. ວິມຸດຕິຍານ ຊື່ວ່າລຸດພົ້ນແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ວິມຸດຕິຍານທັງໝົດນັ້ນ ຊື່ວ່າລຸດພົ້ນແລ້ວແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

ສກ. ວິມຸດຕິຍານ ຊື່ວ່າລຸດພົ້ນແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ປັດຈະເວກຂະນະຍານ ຊື່ວ່າລຸດພົ້ນແລ້ວແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

ສກ. ວິມຸດຕິຍານ ຊື່ວ່າລຸດພົ້ນແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ວິມຸດຕິຍານຂອງໂຄຕະຣະພູບຸກຄົນ ຊື່ວ່າລຸດພົ້ນແລ້ວແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

ສກ. ວິມຸດຕິຍານຂອງບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ ຊື່ວ່າລຸດພົ້ນແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ຍານຂອງພຣະໂສດາບັນ ເປັນຍານຂອງຜູ້ເຖິງ ໄດ້ ບັນລຸ ເຮັດໃຫ້ແຈ້ງໂສດາປັດຕິຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

ສກ. ວິມຸດຕິຍານຂອງບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມິຜົນ ຊື່ວ່າລຸດພົ້ນແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ຍານຂອງພຣະສະກະທາຄາມີ ເປັນຍານຂອງຜູ້ເຖິງ ໄດ້ ບັນລຸ ເຮັດໃຫ້ແຈ້ງສະກະທາຄາມິຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

ສກ. ວິມຸດຕິຍານຂອງບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ ຊື່ວ່າລຸດພົ້ນແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ຍານຂອງພຣະອະນາຄາມີ ເປັນຍານຂອງຜູ້ເຖິງ ໄດ້ ບັນລຸ ເຮັດໃຫ້ແຈ້ງອະນາຄາມີຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວິມຸດຕິຍານຂອງບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ຊື່ວ່າລຸດພົ້ນແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ຍານຂອງພຣະອະຣະຫັນ ເປັນຍານຂອງຜູ້ເຖິງ ໄດ້ ບັນລຸ ເຮັດໃຫ້ແຈ້ງອະຣະຫັດຕະຜົນ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໑໙] ສກ. ວິມຸດຕິຍານຂອງບຸກຄົນຜູ້ພຽບພ້ອມດ້ວຍໂສດາປັດຕິຜົນ ຊື່ວ່າລຸດພົ້ນແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ວິມຸດຕິຍານຂອງບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ ຊື່ວ່າລຸດພົ້ນແລ້ວແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວິມຸດຕິຍານຂອງບຸກຄົນຜູ້ພຽບພ້ອມດ້ວຍສະກະທາຄາມີຜົນຊື່ວ່າລຸດພົ້ນແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ວິມຸດຕິຍານຂອງບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມີຜົນ ຊື່ວ່າລຸດພົ້ນແລ້ວແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວິມຸດຕິຍານຂອງບຸກຄົນຜູ້ພຽບພ້ອມດ້ວຍອະນາຄາມີຜົນ ຊື່ວ່າລຸດພົ້ນແລ້ວ ແມ່ນບໍ?

ປຣ. ແມ່ນ

ສກ. ວິມຸດຕິຍານຂອງບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມີຜົນ ຊື່ວ່າລຸດພົ້ນແລ້ວແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວິມຸດຕິຍານຂອງບຸກຄົນຜູ້ພຽບພ້ອມດ້ວຍອະຣະຫັດຕະຜົນ ຊື່ວ່າລຸດພົ້ນແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ວິມຸດຕິຍານຂອງບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ຊື່ວ່າລຸດພົ້ນແລ້ວແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[๔๘๐] สก. ວິມຸດຕິຍານຂອງບຸກຄົນຜູ້ພຽບພ້ອມດ້ວຍໂສດາປັດຕິຜົນ ຊື່ວ່າລຸດພົ້ນແລ້ວ ແລະວິມຸດຕິຍານນັ້ນເປັນຍານຂອງຜູ້ໄດ້ບັນລຸຜົນແມ່ນບໍ?

ປຣ. ແມ່ນ

สก. ວິມຸດຕິຍານຂອງບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ ຊື່ວ່າລຸດພົ້ນແລ້ວ ແລະວິມຸດຕິຍານນັ້ນເປັນຍານຂອງຜູ້ໄດ້ບັນລຸຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

สก. ວິມຸດຕິຍານຂອງບຸກຄົນຜູ້ພຽບພ້ອມດ້ວຍສະກະທາຄາມິຜົນ ຊື່ວ່າລຸດພົ້ນແລ້ວ ແລະວິມຸດຕິຍານນັ້ນເປັນຍານຂອງຜູ້ໄດ້ບັນລຸຜົນແມ່ນບໍ?

ປຣ. ແມ່ນ

สก. ວິມຸດຕິຍານຂອງບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມິຜົນ ຊື່ວ່າລຸດພົ້ນແລ້ວ ແລະວິມຸດຕິຍານນັ້ນເປັນຍານຂອງຜູ້ໄດ້ບັນລຸຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

สก. ວິມຸດຕິຍານຂອງບຸກຄົນຜູ້ພຽບພ້ອມດ້ວຍອະນາຄາມິຜົນ ຊື່ວ່າລຸດພົ້ນແລ້ວ ແລະວິມຸດຕິຍານນັ້ນເປັນຍານຂອງຜູ້ໄດ້ບັນລຸຜົນແມ່ນບໍ?

ປຣ. ແມ່ນ

สก. ວິມຸດຕິຍານຂອງບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ ຊື່ວ່າລຸດພົ້ນແລ້ວ ແລະວິມຸດຕິຍານນັ້ນເປັນຍານຂອງຜູ້ໄດ້ບັນລຸຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

สก. ວິມຸດຕິຍານຂອງບຸກຄົນຜູ້ພຽບພ້ອມດ້ວຍອະຣະຫັດຕະຜົນ ຊື່ວ່າລຸດພົ້ນແລ້ວ ແລະວິມຸດຕິຍານນັ້ນເປັນຍານຂອງຜູ້ໄດ້ບັນລຸຜົນແມ່ນບໍ?

ປຣ. ແມ່ນ

สก. ວິມຸດຕິຍານຂອງບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ຊື່ວ່າລຸດພົ້ນແລ້ວ ແລະວິມຸດຕິຍານນັ້ນເປັນຍານຂອງຜູ້ໄດ້ບັນລຸຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

**ວິມຸດຕິກະຖາ ຈົບ**

## ๘. ອະເສກຂະຍານະກະຖາ (๔๔)

### ວ່າດ້ວຍຍານຂອງພຣະອະເສຂະ

[๔๘๑] สก. ພຣະເສຂະມີຍານຂອງພຣະອະເສຂະໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະເສຂະຍ່ອມຮູ້ເຫັນທຳຂອງພຣະອະເສຂະ ເຂົ້າເຖິງທຳຂອງພຣະອະເສຂະທີ່ຕົນເຫັນ ຮູ້ ເຮັດໃຫ້ແຈ້ງແລ້ວ ຖືກຕ້ອງດ້ວຍກາຍຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ພຣະເສຂະບໍ່ຮູ້ ບໍ່ເຫັນທຳຂອງພຣະອະເສຂະ ບໍ່ເຂົ້າເຖິງທຳຂອງພຣະອະເສຂະ ທີ່ຕົນບໍ່ເຫັນ ບໍ່ຮູ້ ບໍ່ເຮັດໃຫ້ແຈ້ງແລ້ວ ບໍ່ຖືກຕ້ອງດ້ວຍກາຍຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະເສຂະບໍ່ຮູ້ ບໍ່ເຫັນທຳຂອງພຣະອະເສຂະ ບໍ່ເຂົ້າເຖິງທຳຂອງພຣະອະເສຂະທີ່ຕົນບໍ່ເຫັນ ບໍ່ຮູ້ ບໍ່ເຮັດໃຫ້ແຈ້ງແລ້ວ ບໍ່ຖືກຕ້ອງດ້ວຍກາຍຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ພຣະເສຂະມີຍານຂອງພຣະອະເສຂະໄດ້"

ສກ. ພຣະອະເສຂະມີຍານຂອງພຣະອະເສຂະໄດ້ ພຣະອະເສຂະຍ່ອມຮູ້ ຍ່ອມເຫັນທຳຂອງພຣະອະເສຂະ ຍ່ອມເຂົ້າເຖິງທຳຂອງພຣະອະເສຂະທີ່ຕົນເຫັນ ຮູ້ ເຮັດໃຫ້ແຈ້ງແລ້ວ ຖືກຕ້ອງດ້ວຍກາຍຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະເສຂະມີຍານຂອງພຣະອະເສຂະໄດ້ ພຣະເສຂະຍ່ອມຮູ້ ຍ່ອມເຫັນທຳຂອງພຣະອະເສຂະ ຍ່ອມເຂົ້າເຖິງທຳຂອງພຣະອະເສຂະທີ່ຕົນເຫັນ ຮູ້ ເຮັດໃຫ້ແຈ້ງ ຖືກຕ້ອງດ້ວຍກາຍຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໔໔໔] ສກ. ພຣະເສຂະມີຍານຂອງພຣະອະເສຂະ ພຣະເສຂະບໍ່ຮູ້ ບໍ່ເຫັນທຳຂອງພຣະອະເສຂະ ບໍ່ເຂົ້າເຖິງທຳຂອງພຣະອະເສຂະທີ່ຕົນບໍ່ເຫັນ ບໍ່ຮູ້ ບໍ່ເຮັດໃຫ້ແຈ້ງແລ້ວ ບໍ່ຖືກຕ້ອງດ້ວຍກາຍຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະເສຂະມີຍານຂອງພຣະອະເສຂະ ພຣະອະເສຂະບໍ່ຮູ້ ບໍ່ເຫັນທຳຂອງພຣະອະເສຂະ ບໍ່ເຂົ້າເຖິງທຳຂອງພຣະອະເສຂະທີ່ຕົນບໍ່ເຫັນ ບໍ່ຮູ້ ບໍ່ເຮັດໃຫ້ແຈ້ງແລ້ວບໍ່ຖືກຕ້ອງດ້ວຍກາຍຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ພຣະເສຂະມີຍານຂອງພຣະອະເສຂະໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ໂຄຕະຣະພູບຸກຄົນມີຍານໃນໂສດາປັດຕິມັກໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ ມີຍານໃນໂສດາປັດຕິຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມີຜົນ ຯລຯ ເພື່ອເຮັດໃຫ້ແຈ້ງອະນາຄາມີຜົນ ຯລຯ ເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ມີຍານໃນອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໘໓] ປຣ. ທ່ານບໍ່ຍອມຮັບວ່າ "ພຣະເສຂະມີຍານຂອງພຣະອະເສຂະໄດ້" ແມ່ນບໍ?

ສກ. ແມ່ນ

ປຣ. ທ່ານພຣະອານົນຍັງເປັນພຣະເສຂະຮູ້ວ່າ ພຣະຜູ້ມີພຣະພາກເຈົ້າຊົງມີພຣະຄຸນອັນຍິ່ງ ພຣະສາຣີບຸດເຖຣະ ພຣະມະຫາໂມກຄັນລານະເຖຣະ ຕ່າງກໍມີຄຸນອັນຍິ່ງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກທ່ານພຣະອານົນຍັງເປັນພຣະເສຂະຮູ້ວ່າ ພຣະຜູ້ມີພຣະພາກເຈົ້າຊົງມີພຣະຄຸນອັນຍິ່ງ ພຣະສາຣີບຸດເຖຣະ ພຣະມະຫາໂມກຄັນລານະເຖຣະ ຕ່າງກໍມີຄຸນອັນຍິ່ງ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ພຣະເສຂະກໍມີຍານຂອງພຣະອະເສຂະໄດ້"

**ອະເສກຂະຍານະກະຖາ ຈົບ**

## ໓. ວິປະຣິຕະກະຖາ (໔໕)

## ວ່າດ້ວຍຍານວິປະຣິດ

[໔໘໔] ສກ. ຍານຂອງຜູ້ເຂົ້າສະມາບັດທີ່ມີປະຖະວີກະສິນເປັນອາລົມ ວິປະຣິດໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມວິປະລາດໃນສະພາວະທຳທີ່ບໍ່ທ່ຽງວ່າທ່ຽງມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມວິປະລາດໃນສະພາວະທຳທີ່ເປັນທຸກວ່າເປັນສຸກ ຯລຯ ທີ່ເປັນອະນັດຕາ ວ່າເປັນອັດຕາ ຯລຯ ທີ່ບໍ່ງາມວ່າງາມໄດ້ມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຍານຂອງຜູ້ເຂົ້າສະມາບັດທີ່ມີປະຖະວີກະສິນເປັນອາລົມ ວິປະຣິດໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຍານເປັນອະກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເປັນກຸສົນບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຍານເປັນກຸສົນ ທ່ານກໍບໍ່ຄວນຍອມຮັບວ່າ "ຍານຂອງຜູ້ເຂົ້າສະມາບັດທີ່ມີປະຖະວີກະສິນເປັນອາລົມ ວິປະຣິດໄດ້"

ສກ. ຄວາມວິປະລາດໃນສະພາວະທຳທີ່ບໍ່ທ່ຽງວ່າທ່ຽງ ແລະຄວາມວິປະລາດນັ້ນເປັນອະກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ຍານຂອງຜູ້ເຂົ້າສະມາບັດທີ່ມີປະຖະວີກະສິນເປັນອາລົມ ວິປະຣິດໄດ້ ແລະຍານນັ້ນເປັນອະກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມວິປະລາດໃນສະພາວະທຳທີ່ເປັນທຸກວ່າເປັນສຸກ ຯລຯ ທີ່ເປັນອະນັດຕາວ່າເປັນອັດຕາ ຯລຯ ທີ່ບໍ່ງາມວ່າງາມ ແລະຄວາມວິປະລາດນັ້ນເປັນອະກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ຍານຂອງຜູ້ເຂົ້າສະມາບັດທີ່ມີປະຖະວີກະສິນເປັນອາລົມ ວິປະຣິດໄດ້ ແລະຍານນັ້ນເປັນອະກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໘໕] ສກ. ຍານຂອງຜູ້ເຂົ້າສະມາບັດທີ່ມີປະຖະວີກະສິນເປັນອາລົມ ວິປະຣິດໄດ້ ແລະຍານນັ້ນເປັນອະກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ຄວາມວິປະລາດໃນສະພາວະທຳທີ່ບໍ່ທ່ຽງວ່າທ່ຽງ ແລະຄວາມວິປະລາດນັ້ນເປັນອະກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຍານຂອງຜູ້ເຂົ້າສະມາບັດທີ່ມີປະຖະວີກະສິນເປັນອາລົມ ວິປະຣິດໄດ້ ແລະຍານນັ້ນເປັນອະກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ຄວາມວິປະລາດໃນສະພາວະທຳທີ່ເປັນທຸກວ່າເປັນສຸກ ຯລຯ ທີ່ເປັນອະນັດຕາວ່າເປັນອັດຕາ ຯລຯ ທີ່ບໍ່ງາມວ່າງາມ ແລະຄວາມວິປະລາດນັ້ນເປັນກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໘໖] ສກ. ຍານຂອງຜູ້ເຂົ້າສະມາບັດທີ່ມີປະຖະວີກະສິນເປັນອາລົມ ວິປະຣິດໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນເຂົ້າສະມາບັດທີ່ມີປະຖະວີກະສິນເປັນອາລົມແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະອະຣະຫັນເຂົ້າສະມາບັດທີ່ມີປະຖະວີກະສິນເປັນອາລົມ ທ່ານກໍບໍ່ຄວນຍອມຮັບວ່າ "ຍານຂອງຜູ້ເຂົ້າສະມາບັດທີ່ມີປະຖະວີກະສິນເປັນອາລົມ ວິປະຣິດໄດ້"

ສກ. ຍານຂອງຜູ້ເຂົ້າສະມາບັດທີ່ມີປະຖະວີກະສິນເປັນອາລົມ ວິປະຣິດໄດ້ ພຣະອະຣະຫັນເພິ່ງເຂົ້າສະມາບັດທີ່ມີປະຖະວີກະສິນເປັນອາລົມແມ່ນບໍ?

ປຣ. ແມ່ນ

ສກ. ຄວາມວິປະລາດຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມວິປະລາດຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ສັນຍາວິປະລາດ ຈິດຕະວິປະລາດ ທິດຖິວິປະລາດຂອງພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສັນຍາວິປະລາດ ຈິດຕະວິປະລາດ ທິດຖິວິປະລາດຂອງພຣະອະຣະຫັນບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ຫາກສັນຍາວິປະລາດ ຈິດຕະວິປະລາດ ທິດຖິວິປະລາດຂອງພຣະອະຣະຫັນບໍ່ມີ ທ່ານກໍບໍ່ຄວນຍອມຮັບວ່າ "ຄວາມວິປະລາດຂອງພຣະອະຣະຫັນມີຢູ່"

[໔໘ກ] ປຣ. ທ່ານບໍ່ຍອມຮັບວ່າ "ຍານຂອງຜູ້ເຂົ້າສະມາບັດທີ່ມີປະຖະວີກະສິນເປັນອາລົມ ວິປະຣິດ" ແມ່ນບໍ?

ສກ. ແມ່ນ

ປຣ. ປະຖະວີກະສິນຍ່ອມຜາກົດແກ່ຜູ້ເຂົ້າສະມາບັດທີ່ມີປະຖະວີກະສິນເປັນອາລົມ ເປັນດິນລ້ວນ ໆ ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ດັ່ງນັ້ນ ຍານຂອງຜູ້ເຂົ້າສະມາບັດທີ່ມີປະຖະວີກະສິນເປັນອາລົມຈຶ່ງວິປະຣິດ

ສກ. ຍານຂອງຜູ້ເຂົ້າສະມາບັດທີ່ມີປະຖະວີກະສິນເປັນອາລົມ ວິປະຣິດແມ່ນບໍ?

ປຣ. ແມ່ນ

ສກ. ດິນມີຢູ່ ແລະບາງຄົນທີ່ເຂົ້າປະຖະວີກະສິນຈາກດິນກໍມີຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກດິນມີຢູ່ ແລະບາງຄົນທີ່ເຂົ້າປະຖະວີກະສິນຈາກດິນກໍມີຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ຍານຂອງຜູ້ເຂົ້າສະມາບັດທີ່ມີປະຖະວີກະສິນເປັນອາລົມ ວິປະຣິດໄດ້"

ສກ. ດິນມີຢູ່ ແລະຍານຂອງຜູ້ເຂົ້າປະຖະວີກະສິນຈາກດິນ ວິປະຣິດແມ່ນບໍ?

ປຣ. ແມ່ນ

ສກ. ນິບພານມີຢູ່ ແຕ່ຍານຂອງຜູ້ເຂົ້າສະມາບັດທີ່ມີນິບພານເປັນອາລົມຈາກນິບພານ ກໍວິປະຣິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ຍານຂອງຜູ້ເຂົ້າສະມາບັດທີ່ມີປະຖະວີກະສິນເປັນອາລົມ ວິປະຣິດໄດ້"

**ວິປະຣິຕະກະຖາ ຈົບ**

## ໔. ນິຍາມະກະຖາ (໔໖)

## ວ່າດ້ວຍນິຍາມ

[໔໔໗] ສກ. ບຸກຄົນຜູ້ບໍ່ແນ່ນອນ ມີຍານເພື່ອໄປສູ່ນິຍາມ ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ແນ່ນອນ ມີຍານເພື່ອໄປສູ່ອະນິຍາມ ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ບຸກຄົນຜູ້ແນ່ນອນບໍ່ມີຍານເພື່ອໄປສູ່ອະນິຍາມໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ບໍ່ແນ່ນອນບໍ່ມີຍານເພື່ອໄປສູ່ນິຍາມໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ບຸກຄົນຜູ້ບໍ່ແນ່ນອນມີຍານເພື່ອໄປສູ່ນິຍາມໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ແນ່ນອນມີຍານເພື່ອໄປສູ່ນິຍາມໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ບຸກຄົນຜູ້ແນ່ນອນບໍ່ມີຍານເພື່ອໄປສູ່ນິຍາມໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ບໍ່ແນ່ນອນບໍ່ມີຍານເພື່ອໄປສູ່ນິຍາມໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ບຸກຄົນຜູ້ບໍ່ແນ່ນອນມີຍານເພື່ອໄປສູ່ນິຍາມໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ບໍ່ແນ່ນອນມີຍານເພື່ອໄປສູ່ອະນິຍາມໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ບຸກຄົນຜູ້ບໍ່ແນ່ນອນບໍ່ມີຍານເພື່ອໄປສູ່ອະນິຍາມໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ບໍ່ແນ່ນອນບໍ່ມີຍານເພື່ອໄປສູ່ນິຍາມໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໘໙] ສກ. ບຸກຄົນຜູ້ບໍ່ແນ່ນອນມີຍານເພື່ອໄປສູ່ນິຍາມໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ບໍ່ແນ່ນອນມີນິຍາມເພື່ອໄປສູ່ນິຍາມໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ບໍ່ແນ່ນອນມີຍານເພື່ອໄປສູ່ນິຍາມໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ບໍ່ແນ່ນອນມີສະຕິປັດຖານ ຯລຯ ມີສຳມັບປະທານ ຯລຯ ມີອິດທິບາດ ຯລຯ ມີອິນຊີ ຯລຯ ມີພະລະ ຯລຯ ມີໂພດຊົງ ເພື່ອໄປສູ່ນິຍາມໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ບໍ່ແນ່ນອນບໍ່ມີນິຍາມເພື່ອໄປສູ່ນິຍາມໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນຜູ້ບໍ່ແນ່ນອນບໍ່ມີນິຍາມເພື່ອໄປສູ່ນິຍາມ ທ່ານກໍບໍ່ຄວນຍອມຮັບວ່າ "ບຸກຄົນຜູ້ບໍ່ແນ່ນອນມີຍານເພື່ອໄປສູ່ນິຍາມໄດ້"

ສກ. ບຸກຄົນຜູ້ບໍ່ແນ່ນອນບໍ່ມີສະຕິປັດຖານ ຯລຯ ບໍ່ມີໂພດຊົງ ເພື່ອໄປສູ່ນິຍາມໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນຜູ້ບໍ່ແນ່ນອນບໍ່ມີໂພດຊົງເພື່ອໄປສູ່ນິຍາມ ທ່ານກໍບໍ່ຄວນຍອມຮັບວ່າ "ບຸກຄົນຜູ້ບໍ່ແນ່ນອນມີຍານເພື່ອໄປສູ່ນິຍາມໄດ້"

[໔໙໐] ສກ. ບຸກຄົນຜູ້ບໍ່ແນ່ນອນມີຍານເພື່ອໄປສູ່ນິຍາມໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ໂຄຕະຣະພູບຸກຄົນມີຍານໃນໂສດາປັດຕິມັກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນມີຍານໃນໂສດາປັດຕິຜົນ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມິຜົນ ຯລຯ ອະນາຄາມິຜົນ ຯລຯ ອະຣະຫັດຕະຜົນ ມີຍານໃນອະຣະຫັດຕະຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໙໑] ປຣ. ທ່ານບໍ່ຍອມຮັບວ່າ "ບຸກຄົນຜູ້ບໍ່ແນ່ນອນມີຍານເພື່ອໄປສູ່ນິຍາມໄດ້" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະຜູ້ມີພຣະພາກເຈົ້າຊົງຮູ້ໄດ້ວ່າ "ບຸກຄົນນີ້ຈັກກ້າວລົງສູ່ສຳມັດຕະນິຍາມ ຄວນເພື່ອບັນລຸທຳໄດ້" ບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກພຣະຜູ້ມີພຣະພາກເຈົ້າຊົງຮູ້ໄດ້ວ່າ "ບຸກຄົນນີ້ຈັກກ້າວລົງສູ່ສຳມັດຕະນິຍາມ ຄວນເພື່ອບັນລຸທຳໄດ້" ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ບຸກຄົນຜູ້ບໍ່ແນ່ນອນນິຍາມເພື່ອໄປສູ່ນິຍາມໄດ້"

**ນິຍາມະກະຖາ ຈົບ**

# ໕. ປະຕິສຳພິທາກະຖາ (໔໗)

## ວ່າດ້ວຍປະຕິສຳພິທາ

[໔໓໔] ສກ. ຍານທັງປວງເປັນປະຕິສຳພິທາແມ່ນບໍ?

ປຣ. ແມ່ນ

ສກ. ສົມມຸດຕິຍານເປັນປະຕິສຳພິທາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ສົມມຸດຕິຍານເປັນປະຕິສຳພິທາແມ່ນບໍ?

ປຣ. ແມ່ນ

ສກ. ຊົນເຫຼົ່າໃດຮູ້ສົມມຸດ ຊົນເຫຼົ່ານັ້ນທັງໝົດເປັນຜູ້ເຖິງປະຕິສຳພິທາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຍານທັງປວງເປັນປະຕິສຳພິທາແມ່ນບໍ?

ປຣ. ແມ່ນ

ສກ. ເຈໂຕປະຣິຍະຍານ (ຍານທີ່ກຳນົດຮູ້ໃຈຜູ້ອື່ນ) ເປັນປະຕິສຳພິທາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ເຈໂຕປະຣິຍະຍານເປັນປະຕິສຳພິທາແມ່ນບໍ?

ປຣ. ແມ່ນ

ສກ. ຊົນເຫຼົ່າໃດຮູ້ຈິດຂອງຜູ້ອື່ນ ຊົນເຫຼົ່ານັ້ນທັງໝົດເປັນຜູ້ເຖິງປະຕິສຳພິທາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຍານທັງປວງເປັນປະຕິສຳພິທາແມ່ນບໍ?

ປຣ. ແມ່ນ

ສກ. ປັນຍາທັງປວງເປັນປະຕິສຳພິທາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ປັນຍາທັງປວງເປັນປະຕິສຳພິທາແມ່ນບໍ?

ປຣ. ແມ່ນ

ສກ. ຜູ້ເຂົ້າສະມາບັດທີ່ມີປະຖະວີກະສິນເປັນອາລົມມີປັນຍາ ປັນຍານັ້ນເປັນປະຕິສຳພິທາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຜູ້ເຂົ້າສະມາບັດທີ່ມີອາໂປກະສິນເປັນອາລົມ ຯລຯ ມີເຕໂຊກະສິນເປັນອາລົມ ຯລຯ ມີວາໂຍກະສິນເປັນອາລົມ ຯລຯ ມີນີລະກະສິນເປັນອາລົມ ຯລຯ ມີປີຕະກະສິນເປັນອາລົມ ຯລຯ ມີໂລຫິຕະກະສິນເປັນອາລົມ ຯລຯ ມີໂອທາຕະກະສິນເປັນອາລົມ ຯລຯ ມີອາກາສານັນຈາຍະຕະນະເປັນອາລົມ ຯລຯ ມີວິນຍານັນຈາຍະຕະນະເປັນອາລົມ ຯລຯ ມີອາກິນຈັນຍາຍະຕະນະເປັນອາລົມ ຯລຯ ມີເນວະສັນຍານາສັນຍາຍະຕະນະເປັນອາລົມ ຯລຯ ຖວາຍທານ ຯລຯ ຈີວອນ ຯລຯ ບິນທະບາດ ຯລຯ ເສນາສະນະ ຯລຯ ຖວາຍຄິລານະປັດໄຈເພສັດບໍຣິຂານ ມີປັນຍາ ປັນຍານັ້ນເປັນປະຕິສຳພິທາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໓໓] ປຣ. ທ່ານບໍ່ຍອມຮັບວ່າ "ຍານທັງປວງເປັນປະຕິສຳພິທາ" ແມ່ນບໍ?

ສກ. ແມ່ນ

ປຣ. ໂລກຸດຕະຣະປັນຍາມີຢູ່ ໂລກຸດຕະຣະປັນຍານັ້ນບໍ່ເປັນປະຕິສຳພິທາແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ດັ່ງນັ້ນ ຍານທັງປວງຈຶ່ງເປັນປະຕິສຳພິທາ

**ປະຕິສຳພິທາກະຖາ ຈົບ**

# ໖. ສົມມຸດຕິຍານະກາຖາ (໔໗)

## ວ່າດ້ວຍສົມມຸດຕິຍານ

[໔໓໔] ປຣ. ທ່ານບໍ່ຍອມຮັບວ່າ "ສົມມຸດຕິຍານມີສັດຈະເທົ່ານັ້ນເປັນອາລົມ ບໍ່ມີທຳອື່ນເປັນອາລົມ" ແມ່ນບໍ?

ສກ. ແມ່ນ

ປຣ. ຜູ້ເຂົ້າສະມາບັດທີ່ມີປະຖະວີກະສິນເປັນອາລົມມີຍານຢູ່ ແລະປະຖະວີກະສິນເປັນສົມມຸດສັດຈະແມ່ນບໍ?

ສກ. ແມ່ນ

ປຣ. ຫາກຜູ້ເຂົ້າສະມາບັດທີ່ມີປະຖະວີກະສິນເປັນອາລົມມີຍານຢູ່ ແລະປະຖະວີກະສິນເປັນສຳມຸດສັດຈະ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ສົມມຸດຕິຍານມີສັດຈະເທົ່ານັ້ນເປັນອາລົມ ບໍ່ມີທຳອື່ນເປັນອາລົມ"

ປຣ. ທ່ານບໍ່ຍອມຮັບວ່າ "ສົມມຸດຕິຍານມີສັດຈະເທົ່ານັ້ນເປັນອາລົມ ບໍ່ມີທຳອື່ນເປັນອາລົມ" ແມ່ນບໍ?

ສກ. ແມ່ນ

ປຣ. ຜູ້ເຂົ້າສະມາບັດທີ່ມີອາໂປກະສິນເປັນອາລົມ ຯລຯ ມີເຕໂຊກະສິນເປັນອາລົມ ຯລຯ ຜູ້ຖວາຍຄິລານະປັດໄຈເພສັດບໍຣິຂານມີຍານຢູ່ ແລະຄິລານະປັດໄຈເພສັດບໍຣິຂານເປັນສົມມຸດສັດຈະ ບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກຜູ້ຖວາຍຄິລານະປັດໄຈເພສັດບໍຣິຂານມີຍານຢູ່ ແລະຄິລານະປັດຈະຍະເພສັດບໍຣິຂານເປັນສົມມຸດສັດຈະ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ສົມມຸດຕິຍານມີສັດຈະເທົ່ານັ້ນເປັນອາລົມ ບໍ່ມີທຳອື່ນເປັນອາລົມ"

[໔໓໔] ສກ. ສົມມຸດຕິຍານມີສັດຈະເທົ່ານັ້ນເປັນອາລົມ ບໍ່ມີທຳອື່ນເປັນອາລົມແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນກຳນົດຮູ້ທຸກ ລະສະມຸໄທ ເຮັດໃຫ້ແຈ້ງນິໂຣດ ຈະເລີນມັກໄດ້ດ້ວຍຍານນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

**ສົມມຸດຕິຍານະກະຖາ ຈົບ**

## ໆ. ຈິດຕາຣຳມະນະກະຖາ (໔໙)

## ວ່າດ້ວຍຍານມີຈິດເປັນອາລົມ

[໔໓໕] ສກ. ເຈໂຕປະຣິຍະຍານມີຈິດເທົ່ານັ້ນເປັນອາລົມ ບໍ່ມີທຳອື່ນເປັນອາລົມ ແມ່ນບໍ?

ປຣ. ແມ່ນ

ສກ. ບາງຄົນຮູ້ຊັດແຈ້ງຈິດທີ່ມີຣາຄະວ່າ ຈິດມີຣາຄະ ມີຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກບາງຄົນຮູ້ຊັດແຈ້ງຈິດທີ່ມີຣາຄະວ່າ ຈິດມີຣາຄະມີຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ເຈໂຕປະຣິຍະຍານມີຈິດເທົ່ານັ້ນເປັນອາລົມ ບໍ່ມີທຳອື່ນເປັນອາລົມ"

ສກ. ບາງຄົນຮູ້ຊັດແຈ້ງຈິດທີ່ປາສະຈາກຣາຄະວ່າ ຈິດປາສະຈາກຣາຄະ ຯລຯ ຈິດມີໂທສະ ຯລຯ ຈິດປາສະຈາກໂທສະ ຯລຯ ຈິດມີໂມຫະ ຯລຯ ຈິດປາສະຈາກໂມຫະ ຯລຯ ຈິດຫົດຫູ່ ຯລຯ ຈິດຟຸ້ງຊ່ານ ຯລຯ ຈິດເປັນມະຫັກຄະຕະ ຯລຯ ຈິດບໍ່ເປັນມະຫັກຄະຕະ ຯລຯ ຈິດມີຈິດອື່ນຍິ່ງກວ່າ ຯລຯ ຈິດບໍ່ມີຈິດອື່ນຍິ່ງກວ່າ ຯລຯ ຈິດເປັນສະມາທິ ຯລຯ ຈິດບໍ່ເປັນສະມາທິ ຯລຯ ຈິດລຸດພົ້ນ ຯລຯ ຈິດບໍ່ລຸດພົ້ນວ່າ "ຈິດບໍ່ລຸດພົ້ນ" ມີຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກບາງຄົນຮູ້ຊັດແຈ້ງຈິດທີ່ບໍ່ລຸດພົ້ນວ່າ "ຈິດບໍ່ລຸດພົ້ນ" ມີຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ເຈໂຕປະຣິຍະຍານມີຈິດເທົ່ານັ້ນເປັນອາລົມ ບໍ່ມີທຳອື່ນເປັນອາລົມ"

[໔໓໗] ສກ. ຍານທີ່ມີຜັດສະເປັນອາລົມ ຄວນຮຽກວ່າ "ເຈໂຕປະຣິຍະຍານ" ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຍານທີ່ມີຜັດສະເປັນອາລົມ ຄວນຮຽກວ່າ "ເຈໂຕປະຣິຍະຍານ" ທ່ານກໍບໍ່ຄວນຍອມຮັບວ່າ "ເຈໂຕປະຣິຍະຍານມີຈິດເທົ່ານັ້ນເປັນອາລົມ ບໍ່ມີທຳອື່ນເປັນອາລົມ"

ສກ. ຍານທີ່ມີເວທະນາເປັນອາລົມ ຯລຯ ມີສັນຍາເປັນອາລົມ ຯລຯ ມີເຈຕະນາເປັນອາລົມ ຯລຯ ມີຈິດເປັນອາລົມ ຯລຯ ມີສັດທາເປັນອາລົມ ຯລຯ ມີວິຣິຍະເປັນອາລົມ ຯລຯ ມີສະຕິເປັນອາລົມ ຯລຯ ມີສະມາທິເປັນອາລົມ ຯລຯ ມີປັນຍາເປັນອາລົມ ຯລຯ ມີຣາຄະເປັນອາລົມ ຯລຯ ມີໂທສະເປັນອາລົມ ຯລຯ ມີໂມຫະເປັນອາລົມ ຯລຯ ມີອະໂນດຕັບປະເປັນອາລົມ ຄວນຮຽກວ່າ "ເຈໂຕປະຣິຍະຍານ" ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຍານມີອະໂນດຕັບປະເປັນອາລົມ ຄວນຮຽກວ່າ "ເຈໂຕປະຣິຍະຍານ" ທ່ານກໍບໍ່ຄວນຍອມຮັບວ່າ "ເຈໂຕປະຣິຍະຍານມີຈິດເທົ່ານັ້ນເປັນອາລົມ ບໍ່ມີທຳອື່ນເປັນອາລົມ"

ສກ. ຍານທີ່ມີຜັດສະເປັນອາລົມ ບໍ່ຄວນຮຽກວ່າ "ເຈໂຕປະຣິຍະຍານ" ແມ່ນບໍ?

ປຣ. ແມ່ນ

ສກ. ຍານນັ້ນເປັນຜັດສະປະຣິຍະຍານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຍານມີເວທະນາເປັນອາລົມ ຯລຯ ມີສັນຍາເປັນອາລົມ ຯລຯ ມີອະໂນດຕັບປະເປັນອາລົມ ບໍ່ຄວນຮຽກວ່າ "ເຈໂຕປະຣິຍະຍານ" ແມ່ນບໍ?

ປຣ. ແມ່ນ

ສກ. ຍານນັ້ນເປັນອະໂນດຕັບປະປະຣິຍະຍານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໓໘] ປຣ. ທ່ານບໍ່ຍອມຮັບວ່າ "ເຈໂຕປະຣິຍະຍານມີຈິດເທົ່ານັ້ນເປັນອາລົມ ບໍ່ມີທຳອື່ນເປັນອາລົມ" ແມ່ນບໍ?

ສກ. ແມ່ນ

ປຣ. ເປັນເຈໂຕປະຣິຍະຍານບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກເປັນເຈໂຕປະຣິຍະຍານ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ເຈໂຕປະຣິຍະຍານມີຈິດເທົ່ານັ້ນເປັນອາລົມ ບໍ່ມີທຳອື່ນເປັນອາລົມ"

**ຈິດຕາຣຳມະນະກະຖາ ຈົບ**

## ໘. ອະນາຄະຕະຍານະກະຖາ (໔໐)

## ວ່າດ້ວຍອະນາຄະຕະຍານ

[໔໓໙] ສກ. ອະນາຄະຕະຍານມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ອະນາຄະຕະຍານນັ້ນຮູ້ອະນາຄົດໄດ້ໂດຍມູນ ໂດຍເຫດ ໂດຍແຫຼ່ງກຳເນີດ ໂດຍຕົ້ນກຳເນີດ ໂດຍບໍ່ເກີດ ໂດຍສະມຸດຖານ ໂດຍເຫດເຄື່ອງຫຼໍ່ລ້ຽງ ໂດຍອາລົມ ໂດຍປັດໄຈ ໂດຍສະມຸໄທແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ອະນາຄະຕະຍານມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ອະນາຄະຕະຍານນັ້ນຮູ້ຄວາມເປັນເຫດປັດໄຈ ຄວາມເປັນອາຣຳມະນະປັດໄຈ ຄວາມເປັນອະທິປະຕິປັດໄຈ ຄວາມເປັນອະນັນຕະຣະປັດໄຈ ຄວາມເປັນສະມະນັນຕະຣະປັດໄຈ ທີ່ເປັນອະນາຄົດໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ອະນາຄະຕະຍານມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ໂຄຕະຣະພູບຸກຄົນມີຍານໃນໂສດາປັດຕິມັກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ ມີຍານໃນໂສດາປັດຕິຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມິຜົນ ຯລຯ ອະນາຄາມິຜົນ ຯລຯ ອະຣະຫັດຕະຜົນ ມີຍານໃນອະຣະຫັດຕະຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໔໐] ປຣ. ທ່ານບໍ່ຍອມຮັບວ່າ "ອະນາຄະຕະຍານມີຢູ່" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ອານົນ ອັນຕະລາຍ ໓ ຢ່າງ ຄື (໑) ອັນຕະລາຍຈາກໄຟ (໒) ອັນຕະລາຍຈາກນ້ຳ (໓) ອັນຕະລາຍຈາກການແຕກຄວາມສາມັກຄີ ຈັກມີແກ່ນະຄອນປາຕະລີບຸດ" ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ອະນາຄະຕະຍານຈຶ່ງມີຢູ່

# ໗. ປັດຈຸບັນນະຍານະກະຖາ (໕໑)

## ວ່າດ້ວຍປັດຈຸບັນນະຍານ

[໔໔໑] ສກ. ປັດຈຸບັນນະຍານມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຮູ້ຍານນັ້ນໄດ້ດ້ວຍປັດຈຸປັນນະຍານນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຮູ້ຍານນັ້ນໄດ້ດ້ວຍປັດຈຸບັນນະຍານນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຮູ້ຍານນັ້ນວ່າເປັນຍານ ໄດ້ດ້ວຍປັດຈຸບັນນະຍານນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູ້ຍານນັ້ນວ່າເປັນຍານ ໄດ້ດ້ວຍປັດຈຸບັນນະຍານນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ຍານນັ້ນເປັນອາລົມຂອງປັດຈຸບັນນະຍານນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຍານນັ້ນເປັນອາລົມຂອງປັດຈຸບັນນະຍານນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ຖືກຕ້ອງຜັດສະນັ້ນດ້ວຍຜັດສະນັ້ນ ສະເຫວີຍເວທະນານັ້ນດ້ວຍເວທະນານັ້ນ ຈຳສັນຍານັ້ນດ້ວຍສັນຍານັ້ນ ຈົງໃຈເຈຕະນານັ້ນດ້ວຍເຈຕະນານັ້ນ ຄິດຈິດນັ້ນດ້ວຍຈິດນັ້ນ ນຶກ

ວິຕົກນັ້ນດ້ວຍວິຕົກນັ້ນ ຕອງວິຈານນັ້ນດ້ວຍວິຈານນັ້ນ ເອີບອີ່ມປີຕິນັ້ນດ້ວຍປີຕິນັ້ນ ຣະລຶກສະຕິນັ້ນດ້ວຍສະຕິນັ້ນ ຮູ້ຊັດແຈ້ງປັນຍານັ້ນດ້ວຍປັນຍານັ້ນ ຕັດດາບນັ້ນດ້ວຍດາບນັ້ນ ຖາກຂວານນັ້ນດ້ວຍຂວານນັ້ນ ຖາກຜຶ່ງນັ້ນດ້ວຍຜຶ່ງນັ້ນ ຖາກມີດນັ້ນດ້ວຍມີດນັ້ນ ຫຍິບເຂັມນັ້ນດ້ວຍເຂັມນັ້ນ ລູບຄຳປາຍນິ້ວມືນັ້ນດ້ວຍປາຍນິ້ວມືນັ້ນ ລູບຄຳປາຍດັງນັ້ນດ້ວຍປາຍດັງນັ້ນ ລູບຄຳກະໝ່ອມນັ້ນດ້ວຍກະໝ່ອມນັ້ນ ລ້າງຄູດນັ້ນດ້ວຍຄູດນັ້ນ ລ້າງມູນນັ້ນດ້ວຍມູນນັ້ນ ລ້າງນ້ຳລາຍນັ້ນດ້ວຍນ້ຳລາຍນັ້ນ ລ້າງນ້ຳໜອງນັ້ນດ້ວຍນ້ຳໜອງນັ້ນ ລ້າງເລືອດນັ້ນດ້ວຍເລືອດນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໔໔] ປຣ. ທ່ານບໍ່ຍອມຮັບວ່າ "ປັດຈຸບັນນະຍານມີຢູ່" ແມ່ນບໍ?

ສກ. ແມ່ນ

ປຣ. ເມື່ອພຣະໂຍຄາວະຈອນເຫັນສັງຂານທັງປວງໂດຍຄວາມເປັນສະພາວະບໍ່ທ່ຽງແລ້ວ ກໍເປັນອັນເຫັນຍານນັ້ນ ໂດຍຄວາມເປັນສະພາວະບໍ່ທ່ຽງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກເມື່ອພຣະໂຍຄາວະຈອນເຫັນສັງຂານທັງປວງໂດຍຄວາມເປັນສະພາວະບໍ່ທ່ຽງແລ້ວ ກໍເປັນອັນເຫັນຍານນັ້ນໂດຍຄວາມເປັນສະພາວະບໍ່ທ່ຽງ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ປັດຈຸບັນນະຍານມີຢູ່"

**ປັດຈຸບັນນະຍານະກະຖາ ຈົບ**

## ໑໐. ຜະລະຍານະກະຖາ (໕໔)

## ວ່າດ້ວຍຜະລະຍານ

[໔໔໓] ສກ. ພຣະສາວົກມີຜະລະຍານແມ່ນບໍ?

ປຣ.໔ ແມ່ນ

ສກ. ພຣະສາວົກກຳນົດຜົນອັນເປັນຄຸນສົມບັດຂອງຕົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະສາວົກມີຜະລະຍານແມ່ນບໍ?

ປຣ. ແມ່ນ

ສກ. ການຮູ້ຄວາມຍິ່ງແລະຢ່ອນແຫ່ງຜົນ ການຮູ້ຄວາມຍິ່ງແລະຢ່ອນແຫ່ງອິນຊີ ການຮູ້ຄວາມຍິ່ງແລະຢ່ອນແຫ່ງບຸກຄົນ ຂອງພຣະສາວົກມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະສາວົກມີຜະລະຍານແມ່ນບໍ?

ປຣ. ແມ່ນ

ສກ. ການບັນຍັດ ຂັນ ອາຍະຕະນະ ທາດ ສັດຈະ ອິນຊີ ບຸກຄົນ ຂອງພຣະສາວົກ ມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະສາວົກມີຜະລະຍານແມ່ນບໍ?

ປຣ. ແມ່ນ

ສກ. ພຣະສາວົກເປັນພຣະຊິນນະເຈົ້າ ເປັນພຣະສາດສະດາ ເປັນພຣະສຳມາສຳພຸດທະເຈົ້າ ເປັນພຣະສັບພັນຍູ ເປັນພຣະສັບພະທັດສາວີ ເປັນພຣະທຳມັດສາມີ ເປັນພຣະທຳມະປະຕິສະຣະນະ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະສາວົກມີຜະລະຍານແມ່ນບໍ?

ປຣ. ແມ່ນ

ສກ. ພຣະສາວົກເປັນຜູ້ຢັ່ງມັກທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ໃຫ້ກຳເນີດແກ່ມັກທີ່ຍັງບໍ່ມີຜູ້ໃຫ້ກຳເນີດ ເປັນຜູ້ບອກມັກທີ່ຍັງບໍ່ມີຜູ້ບອກ ເປັນຜູ້ຮູ້ມັກ ເຂົ້າໃຈມັກ ສະຫຼາດໃນມັກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໔໔] ປຣ. ທ່ານບໍ່ຍອມຮັບວ່າ "ພຣະສາວົກມີຜະລະຍານ" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສາວົກເປັນຜູ້ບໍ່ມີຍານແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ດັ່ງນັ້ນ ພຣະສາວົກຈຶ່ງມີຜະລະຍານ ຯລຯ

**ຜະລະຍານະກະຖາ ຈົບ**

**ປັນຈະມະວັກ ຈົບ**

## ລວມກະຖາທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ວິມຸດຕິກະຖາ | ໒. ອະເສກຂະຍານະກະຖາ |
| ໓. ວິປະຣິຕະກະຖາ | ໔. ນິຍາມະກະຖາ |
| ໕. ປະຕິສຳພິທາກະຖາ | ໖. ສົມມຸດຕິຍານະກາຖາ |
| ໗. ຈິດຕາຣຳມະນະກະຖາ | ໘. ອະນາຄະຕະຍານະກະຖາ |
| ໙. ປັດຈຸບັນນະຍານະກະຖາ | ໑໐. ຜະລະຍານະກະຖາ |

**ມະຫາປັນນາດ ຈົບ**

## ລວມວັກທີ່ມີໃນມະຫາປັນນາດນີ້ ຄື



# ໖. ສັດຖະວັກ

## ໑. ນິຍາມະກະຖາ (໕໓)

### ວ່າດ້ວຍນິຍາມ

[໔໔໕] ສກ. ນິຍາມເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ (ເປັນອະສັງຂະຕະ) ແມ່ນບໍ?

ປຣ. ແມ່ນ

ສກ. ນິຍາມເປັນນິບພານ ເປັນບ່ອນຕ້ານທານ ເປັນບ່ອນເຊື່ອງ ເປັນບ່ອນເພິ່ງ ເປັນບ່ອນໝາຍ ເປັນບ່ອນໝັ້ນ ເປັນອຳມະຕະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ນິຍາມເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ນິບພານກໍເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງມີ ໒ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງມີ ໒ ຢ່າງແມ່ນບໍ?

ປຣ. ແມ່ນ

ສກ. ບ່ອນຕ້ານທານມີ ໒ ຢ່າງ ບ່ອນເຊື່ອງມີ ໒ ຢ່າງ ບ່ອນເພິ່ງມີ ໒ ຢ່າງ ບ່ອນໝາຍມີ ໒ ຢ່າງ ບ່ອນໝັ້ນມີ ໒ ຢ່າງ ອຳມະຕະມີ ໒ ຢ່າງ ນິບພານມີ ໒ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ນິບພານມີ ໒ ຢ່າງແມ່ນບໍ?

ປຣ. ແມ່ນ

สภ. นิบพานทัງ ๘ ย่าງ ยัງมีถວามสูງต่ำ ถວามຊົ່ວและถວามปะนิด ถວามยิ่ງ และย่ອน เຂດแดน ถວามแตกต่าງ ຮ່ອງຮອຍ ຊ່ອງວ່າງຢູ່แม่นบໍ?

ປຣ. บໍ່ถວນກ່າວแบวนั้น ຯລຯ

สภ. นิยามเป็นสะพาวะทำที่บໍ່ຖືກປັດໄຈປຸງแต่ງแม่นบໍ?

ປຣ. แม่น

สภ. มีบุกถົນบาງພວກກ້າວລົງສູ່นิยาม ໄດ້นิยาม ໃຫ້นิยามອຸບັດຂື້ນ ໃຫ້ອຸບັດຂື້ນ ດ້ວຍດີ ໃຫ້ຕັ້ງຂື້ນ ໃຫ້ຕັ້ງຂື້ນດ້ວຍດີ ໃຫ້ບັງເກີດ ໃຫ້ບັງເກີດໂດຍຍິ່ງ ໃຫ້ເກີດ ໃຫ້ເກີດດ້ວຍດີ แม่นบໍ?

ປຣ. แม่น

สภ. บຸກຄົນບາງພວກກ້າວລົງສູ່ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ໄດ້ສະພາວະທຳທີ່ບໍ່ ຖືກປັດໄຈປຸງແຕ່ງ ໃຫ້ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງອຸບັດຂື້ນ ໃຫ້ອຸບັດຂື້ນດ້ວຍດີ ໃຫ້ຕັ້ງ ຂື້ນ ໃຫ້ຕັ້ງຂື້ນດ້ວຍດີ ໃຫ້ບັງເກີດ ໃຫ້ບັງເກີດໂດຍຍິ່ງໃຫ້ເກີດ ໃຫ້ເກີດດ້ວຍດີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໔໖] ສກ. ນິຍາມເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ມັກເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ມັກເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ນິຍາມເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂສດາປັດຕິນິຍາມເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ໂສດາປັດຕິມັກເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂສດາປັດຕິມັກເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ໂສດາປັດຕິນິຍາມເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະກະທາຄາມິນິຍາມ ຯລຯ ອະນາຄາມິນິຍາມ ຯລຯ ອະຣະຫັດຕະນິຍາມເປັນ ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ອະຣະຫັດຕະມັກເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະຣະຫັດຕະມັກເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ອະຣະຫັດຕະນິຍາມເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂສດາປັດຕິນິຍາມເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ຯລຯ ອະຣະຫັດຕະນິຍາມເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ນິບພານກໍເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງມີ ໕ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງມີ ໕ ຢ່າງແມ່ນບໍ?

ປຣ. ແມ່ນ

ສກ. ບ່ອນຕ້ານທານມີ ໕ ຢ່າງ ຯລຯ ຊ່ອງວ່າງແຫ່ງນິບພານມີ ໕ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ນິຍາມເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ມິດສັດຕະນິຍາມເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ມິດສັດຕະນິຍາມເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ສຳມັດຕະນິຍາມເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໑] ປຣ. ທ່ານບໍ່ຍອມຮັບວ່າ "ນິຍາມເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ" ແມ່ນບໍ?

ສກ. ແມ່ນ

ປຣ. ເມື່ອນິຍາມເກີດຂຶ້ນແລ້ວດັບໄປ ບຸກຄົນກໍຍັງເປັນຜູ້ບໍ່ແນ່ນອນຢູ່ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ດັ່ງນັ້ນ ນິຍາມຈຶ່ງເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ

ປຣ. ເມື່ອມິດສັດຕະນິຍາມເກີດຂຶ້ນແລ້ວດັບໄປ ບຸກຄົນກໍຍັງເປັນຜູ້ບໍ່ແນ່ນອນຢູ່ ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ດັ່ງນັ້ນ ນິດສັດຕະນິຍາມຈຶ່ງເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ

**ນິຍາມະກະຖາ ຈົບ**

# ໘. ປະຕິດຈະສະມຸປະປາທະກະຖາ (໕໘)

## ວ່າດ້ວຍປະຕິດຈະສະມຸບບາດ

[໔໘໗] ສກ. ປະຕິດຈະສະມຸບບາດເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ (ເປັນອະສັງຂະຕະ) ແມ່ນບໍ?

ປຣ. ແມ່ນ

ສກ. ປະຕິດຈະສະມຸບບາດເປັນບ່ອນດັບ ເປັນບ່ອນຕ້ານທານ ເປັນບ່ອນເຊື່ອງ ເປັນບ່ອນເພິ່ງ ເປັນບ່ອນໝາຍ ເປັນບ່ອນໝັ້ນ ເປັນອຳມະຕະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ປະຕິດຈະສະມຸບບາດເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ນິບພານກໍເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງມີ ໒ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງມີ ໒ ຢ່າງແມ່ນບໍ?

ປຣ. ແມ່ນ

ສກ. ບ່ອນຕ້ານທານມີ ໒ ຢ່າງ ບ່ອນເຊື່ອງມີ ໒ ຢ່າງ ບ່ອນເພິ່ງມີ ໒ ຢ່າງ ບ່ອນໝາຍມີ ໒ ຢ່າງ ບ່ອນໝັ້ນມີ ໒ ຢ່າງ ອຳມະຕະມີ ໒ ຢ່າງ ນິບພານມີ ໒ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ນິບພານມີ ໒ ຢ່າງແມ່ນບໍ?

ປຣ. ແມ່ນ

ສກ. ນິບພານທັງ ໒ ຢ່າງ ຍັງມີຄວາມສູງຕ່ຳ ຄວາມຊົ່ວແລະຄວາມປະນີດ ຄວາມຍິ່ງແລະຢ່ອນ ເຂດແດນ ຄວາມແຕກຕ່າງ ຮ່ອງຮອຍ ຊ່ອງວ່າງຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໘໙] ສກ. ປະຕິດຈະສະມຸບບາດເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ອະວິດຊາເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະວິດຊາເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ປະຕິດຈະສະມຸບບາດເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ປະຕິດຈະສະມຸບບາດເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ສັງຂານທີ່ເກີດຍ້ອນອະວິດຊາເປັນປັດໄຈເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສັງຂານທີ່ເກີດຍ້ອນອະວິດຊາເປັນປັດໄຈເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ປະຕິດຈະສະມຸບບາດເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ປະຕິດຈະສະມຸບບາດເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ວິນຍານທີ່ເກີດຍ້ອນສັງຂານເປັນປັດໄຈເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວິນຍານທີ່ເກີດຍ້ອນສັງຂານເປັນປັດໄຈເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ປະຕິດຈະສະມຸບບາດເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ປະຕິດຈະສະມຸບບາດເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ນາມຮູບທີ່ເກີດຍ້ອນວິນຍານເປັນປັດໄຈເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ນາມຮູບທີ່ເກີດຍ້ອນວິນຍານເປັນປັດໄຈເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ປະຕິດຈະສະມຸບບາດເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ປະຕິດຈະສະມຸບບາດເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ຊະຣາມໍຣະນະທີ່ເກີດຍ້ອນຊາດເປັນປັດໄຈ ເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຊະຣາມໍຣະນະທີ່ເກີດຍ້ອນຊາດເປັນປັດໄຈ ເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ປະຕິດຈະສະມຸບບາດເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໕໐] ປຣ. ທ່ານບໍ່ຍອມຮັບວ່າ "ປະຕິດຈະສະມຸບບາດເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "(ພຣະຜູ້ມີພຣະພາກເຈົ້າຕັດວ່າ) ພິກຂຸທັງຫຼາຍ ຊະຣາມໍຣະນະທີ່ເກີດຍ້ອນຊາດເປັນປັດໄຈ ພຣະຕະຖາຄົດທັງຫຼາຍຈະອຸບັດຫຼືບໍ່ອຸບັດກໍຕາມ ທາດນັ້ນໄດ້ຕັ້ງຢູ່ແລ້ວໂດຍແທ້ ເປັນເຫດຄວາມດຳລົງຢູ່ແຫ່ງທຳ ເປັນເຫດກຳນົດຄວາມແນ່ນອນແຫ່ງທຳ ຄືຄວາມທີ່ທຳນີ້ເປັນປັດໄຈ ພຣະຕະຖາຄົດຕັດສະຣູ້ຍິ່ງ ໄດ້ບັນລຸທາດນັ້ນ ເມື່ອຕັດສະຣູ້ແລ້ວ ຈຶ່ງຕັດບອກ ຊີ້ງສະແດງ ບັນຍັດ ກໍ່ຕັ້ງ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍຂຶ້ນ" ຕັດວ່າ "ທ່ານທັງຫຼາຍຈົ່ງເບິ່ງ ຊະຣາມໍຣະນະທີ່ເກີດຍ້ອນຊາດເປັນປັດໄຈ ຊາດທີ່ເກີດຍ້ອນພົບເປັນປັດໄຈ ຯລຯ ສັງຂານທີ່ເກີດຍ້ອນອະວິດຊາເປັນປັດໄຈ ພຣະຕະຖາຄົດທັງຫຼາຍຈະອຸບັດຫຼືບໍ່ອຸບັດກໍຕາມ ທາດນັ້ນໄດ້ຕັ້ງຢູ່ແລ້ວໂດຍແທ້ ຯລຯ" ແລະຕັດວ່າ "ທ່ານທັງຫຼາຍຈົ່ງເບິ່ງສັງຂານທີ່ເກີດຍ້ອນອະວິດຊາເປັນປັດໄຈດັ່ງນີ້ແລ ພິກຂຸທັງຫຼາຍ ຄວາມຈິງແທ້ ຄວາມບໍ່ຜິດຄວາມບໍ່ເປັນແນວອື່ນ ຄືຄວາມທີ່ທຳນີ້ເປັນປັດໄຈ ມີຢູ່ໃນສະພາວະທຳນັ້ນ ດ້ວຍປະການແນວນີ້ອັນນີ້ເຮົາຮຽກວ່າ ປະຕິດຈະສະມຸປະບາດ" ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ປະຕິດຈະສະມຸບບາດຈຶ່ງເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ

[໔໕໑] ສກ. ຄວາມດຳລົງຢູ່ແຫ່ງທຳ ຄວາມກຳນົດຄວາມແນ່ນອນແຫ່ງທຳ ໃນປະຕິດຈະສະມຸບບາດຂໍ້ວ່າ "ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ" ນັ້ນ ເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ນິບພານກໍເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງມີ ໒ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງມີ ໒ ຢ່າງແມ່ນບໍ?

ປຣ. ແມ່ນ

ສກ. ບ່ອນຕ້ານທານມີ ໒ ຢ່າງ ຯລຯ ຊ່ອງວ່າງແຫ່ງນິບພານມີ ໒ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມດຳລົງຢູ່ແຫ່ງທຳ ຄວາມກຳນົດຄວາມແນ່ນອນແຫ່ງທຳ ໃນປະຕິດຈະສະມຸບບາດຂໍ້ວ່າ "ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ" ນັ້ນ ເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ຄວາມດຳລົງຢູ່ແຫ່ງທຳ ຄວາມກຳນົດຄວາມແນ່ນອນແຫ່ງທຳ ໃນປະຕິດຈະສະມຸບບາດຂໍ້ວ່າ "ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ" ນັ້ນ ເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ນິບພານກໍເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງມີ ໓ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງມີ ໓ ຢ່າງແມ່ນບໍ?

ປຣ. ແມ່ນ

ສກ. ບ່ອນຕ້ານທານມີ ໓ ຢ່າງ ຯລຯ ຊ່ອງວ່າງແຫ່ງນິບພານມີ ໓ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມດຳລົງຢູ່ແຫ່ງທຳ ຄວາມກຳນົດຄວາມແນ່ນອນແຫ່ງທຳ ໃນປະຕິດຈະສະມຸບບາດຂໍ້ວ່າ "ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ" ນັ້ນ ເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ຄວາມດຳລົງຢູ່ແຫ່ງທຳ ຄວາມກຳນົດຄວາມແນ່ນອນແຫ່ງທຳ ໃນປະຕິດຈະສະມຸບບາດຂໍ້ວ່າ "ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ" ນັ້ນ ເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ຯລຯ ຄວາມດຳລົງຢູ່ແຫ່ງທຳ ຄວາມກຳນົດຄວາມແນ່ນອນແຫ່ງທຳໃນປະຕິດຈະສະມຸບບາດຂໍ້ວ່າ "ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ" ນັ້ນ ເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ນິບພານກໍເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງມີ ໑໒ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງມີ ໑໘ ຢ່າງແມ່ນບໍ?

ປຣ. ແມ່ນ

ສກ. ບ່ອນຕ້ານທານມີ ໑໘ ຢ່າງ ບ່ອນເຊື່ອງມີ ໑໘ ຢ່າງ ຯລຯ ຊ່ອງວ່າງແຫ່ງນິບພານມີ ໑໘ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

**ປະຕິດຈະສະມຸປະປາທະກະຖາ ຈົບ**

# ๓. ສັດຈະກະຖາ (໕໕)

## ວ່າດ້ວຍສັດຈະ

[໕໕໘] ສກ. ສັດຈະ ໔ ເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ (ເປັນອະສັງຂະຕະ) ແມ່ນບໍ?

ປຣ. ແມ່ນ

ສກ. ບ່ອນຕ້ານທານມີ ໔ ຢ່າງ ບ່ອນເຊື່ອງມີ ໔ ຢ່າງ ບ່ອນເພິ່ງມີ ໔ ຢ່າງ ບ່ອນໝາຍມີ ໔ ຢ່າງ ບ່ອນໝັ້ນມີ ໔ ຢ່າງ ອຳມະຕະມີ ໔ ຢ່າງ ນິບພານມີ ໔ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ນິບພານມີ ໔ ຢ່າງແມ່ນບໍ?

ປຣ. ແມ່ນ

ສກ. ນິບພານທັງ ໔ ຢ່າງ ຍັງມີຄວາມສູງຕ່ຳ ຄວາມຊົ່ວແລະຄວາມປະນີດ ຄວາມຍິ່ງແລະຍ່ອນ ເຂດແດນ ຄວາມແຕກຕ່າງ ຮ່ອງຮອຍ ຊ່ອງວ່າງຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ທຸກຂະສັດເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ທຸກເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ທຸກຂະສັດເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ທຸກທາງກາຍ ທຸກທາງໃຈ ຄວາມໂສກ ຄວາມຄ່ຳຄວນຮ້ອງໄຫ້ ຄວາມລຳບາກກາຍ ຄວາມລຳບາກໃຈ ຄວາມຄັບແຄ້ນໃຈເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະມຸທະຍະສັດເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ສະມຸໄທເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະມຸທະຍະສັດເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ກາມຕັນຫາ ພະວະຕັນຫາ ວິພະວະຕັນຫາເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ມັກຄະສັດເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ມັກເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ມັກຄະສັດເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ສຳມາທິດຖິ ຯລຯ ສຳມາສະມາທິເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ທຸກເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ທຸກຂະສັດເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ທຸກທາງກາຍ ທຸກທາງໃຈ ຄວາມໂສກ ຄວາມຄ່ຳຄວນຮ້ອງໄຫ້ ຄວາມລຳບາກກາຍ ຄວາມລຳບາກໃຈ ຄວາມຄັບແຄ້ນໃຈເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ທຸກຂະສັດເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະມຸໄທເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ສະມຸທະຍະສັດເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກາມຕັນຫາ ພະວະຕັນຫາ ວິພະວະຕັນຫາເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງ ແມ່ນບໍ?

ປຣ. ແມ່ນ

ສກ. ສະມຸທະຍະສັດເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ມັກເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ມັກຄະສັດເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສຳມາທິດຖິ ຯລຯ ສຳມາສະມາທິເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ມັກຄະສັດເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໘໕໑] ສກ. ນິໂຣທະສັດເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ນິໂຣດກໍເປັນສະພາວະທຳ ທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ທຸກຂະສັດເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ທຸກກໍເປັນສະພາວະທຳທີ່ບໍ່ຖືກ ປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ນິໂຣທະສັດເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ນິໂຣດກໍເປັນສະພາວະທຳທີ່ບໍ່ ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ສະມຸທະຍະສັດເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ສະມຸໄທກໍເປັນສະພາວະ ທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ນິໂຣທະສັດເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ນິໂຣດກໍເປັນສະພາວະທຳທີ່ບໍ່ ຖືກ ປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ມັກຄະສັດເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ມັກກໍເປັນສະພາວະທຳທີ່ບໍ່ຖືກ ປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ທຸກຂະສັດເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ແຕ່ທຸກເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ນິໂຣທະສັດເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ແຕ່ນິໂຣດເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະມຸທະຍະສັດເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ແຕ່ສະມຸໄທເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ນິໂຣທະສັດເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ແຕ່ນິໂຣດເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ມັກຄະສັດເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ແຕ່ມັກເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ນິໂຣທະສັດເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ແຕ່ນິໂຣດເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໕໔] ປຣ. ທ່ານບໍ່ຍອມຮັບວ່າ "ສັດຈະ ໔ ເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ສັດຈະ ໔ ແນວນີ້ເປັນຂອງແທ້ ບໍ່ຜິດ ບໍ່ເປັນແນວອື່ນ ສັດຈະ ໔ ຢ່າງອັນໃດແດ່ ຄື (໑) ຄຳວ່າ ນີ້ທຸກ ເປັນຂອງແທ້ ບໍ່ຜິດ ບໍ່ເປັນແນວອື່ນ (໒) ຄຳວ່າ ນີ້ສະມຸໄທ ຯລຯ (໓) ຄຳວ່າ ນີ້ທຸກຂະນິໂຣທະ ຯລຯ (໔) ຄຳວ່າ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ ເປັນຂອງແທ້ ບໍ່ຜິດ ບໍ່ເປັນແນວອື່ນ ພິກຂຸທັງຫຼາຍ ສັດຈະ ໔ ຢ່າງນີ້ ເປັນຂອງແທ້ ບໍ່ຜິດ ບໍ່ເປັນແນວອື່ນ" ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ສັດຈະ ໔ ຈຶ່ງເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ

**ສັດຈະກະຖາ ຈົບ**

# ๔. ອາຣຸບປະກະຖາ (໕໗)

## ວ່າດ້ວຍອະຣູບຊານ

[໔໕໔] ສກ. ອາກາສານັນຈາຍະຕະນະຊານເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ (ເປັນອະສັງຂະຕະ) ແມ່ນບໍ?

ປຣ. ແມ່ນ

ສກ. ອາກາສານັນຈາຍະຕະນະຊານ ເປັນນິບພານ ເປັນບ່ອນຕ້ານທານ ເປັນບ່ອນເຊື່ອງ ເປັນບ່ອນເພິ່ງ ເປັນບ່ອນໝາຍ ເປັນບ່ອນໝັ້ນ ເປັນອຳມະຕະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ອາກາສານັນຈາຍະຕະນະຊານ ເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງນິບພານກໍເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງມີ ໒ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງມີ ໒ ຢ່າງແມ່ນບໍ?

ປຣ. ແມ່ນ

ສກ. ບ່ອນຕ້ານທານມີ ໒ ຢ່າງ ໆລໆ ຊ່ອງວ່າງແຫ່ງນິບພານມີ ໒ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ອາກາສານັນຈາຍະຕະນະຊານເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ອາກາສານັນຈາຍະຕະນະຊານ ເປັນພົບ ເປັນຄະຕິ ເປັນສັດຕາວາດ ເປັນສົງສານ ເປັນກຳເນີດ ເປັນວິນຍານະຖິຕິ ເປັນການໄດ້ອັດຕະພາບແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸ່ງແຕ່ງ ເປັນພົບ ເປັນຄະຕິ ເປັນສັດຕາວາດ ເປັນສົງສານ ເປັນກຳເນີດ ເປັນວິນຍານະຖິຕິ ເປັນການໄດ້ອັດຕະພາບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ກຳທີ່ເປັນເຫດເຂົ້າເຖິງອາກາສານັນຈາຍະຕະນະຊານມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ກຳທີ່ເປັນເຫດເຂົ້າເຖິງສະພາວະທຳທີ່ບໍ່ຖືກປັດໄຈປຸ່ງແຕ່ງມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ສັດຜູ້ເຂົ້າເຖິງອາກາສານັນຈາຍະຕະນະຊານມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ສັດຜູ້ເຂົ້າເຖິງສະພາວະທຳທີ່ບໍ່ຖືກປັດໄຈປຸ່ງແຕ່ງມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນອາກາສານັນຈາຍະຕະນະຊານ ມີສັດເກີດ ແກ່ ຕາຍ ຈຸຕິ ປະຕິສົນທິ ແມ່ນບໍ?

ປຣ. ແມ່ນ

ສກ. ໃນສະພາວະທຳທີ່ບໍ່ຖືກປັດໄຈປຸ່ງແຕ່ງ ມີສັດເກີດ ແກ່ ຕາຍ ຈຸຕິ ປະຕິສົນທິ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນອາກາສານັນຈາຍະຕະນະຊານ ມີເວທະນາ ສັນຍາ ສັງຂານ ວິນຍານ ແມ່ນບໍ?

ປຣ. ແມ່ນ

ສກ. ໃນສະພາວະທຳທີ່ບໍ່ຖືກປັດໄຈປຸ່ງແຕ່ງມີເວທະນາ ສັນຍາ ສັງຂານ ວິນຍານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອາກາສານັນຈາຍະຕະນະຊານເປັນພົບທີ່ມີຂັນ ໔ ແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸ່ງແຕ່ງເປັນພົບທີ່ມີຂັນ ໔ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໕໖] ປຣ. ທ່ານບໍ່ຍອມຮັບວ່າ "ອະຣູບຊານ ໔ ເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ" ແມ່ນບໍ?

ສກ. ແມ່ນ

ປຣ. ອະຣູບຊານ ໔ ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນທຳບໍ່ຫວັ່ນໄຫວ ບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກອະຣູບຊານ ໔ ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນທຳບໍ່ຫວັ່ນໄຫວ ດັ່ງນັ້ນທ່ານຈຶ່ງຄວນຍອມຮັບວ່າ "ອະຣູບຊານ ໔ ເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ"

**ອາຣຸບປະກະຖາ ຈົບ**

# ໕. ນິໂຣທະສະມາປັດຕິກະຖາ (໕໗)

## ວ່າດ້ວຍນິໂຣທະສະມາປັດ

[໔໕໗] ສກ. ນິໂຣທະສະມາບັດເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ (ເປັນອະສັງຂະຕະ) ແມ່ນບໍ?

ປຣ. ແມ່ນ

ສກ. ນິໂຣທະສະມາບັດເປັນນິບພານ ເປັນບ່ອນຕ້ານທານ ເປັນບ່ອນເຊື່ອງ ເປັນບ່ອນເພິ່ງ ເປັນບ່ອນໝາຍ ເປັນບ່ອນໝັ້ນ ເປັນອຳມະຕະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ນິໂຣທະສະມາບັດເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ນິບພານກໍເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງມີ ໒ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງມີ ໒ ຢ່າງແມ່ນບໍ?

ປຣ. ແມ່ນ

ສກ. ບ່ອນຕ້ານທານມີ ໒ ຢ່າງ ຯລຯ ຊ່ອງວ່າງແຫ່ງນິບພານມີ ໒ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ນິໂຣທະສະມາບັດເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນບາງພວກເຂົ້ານິໂຣທະສະມາບັດ ໄດ້ນິໂຣທະສະມາບັດ ໃຫ້ນິໂຣທະສະມາບັດອຸບັດຂຶ້ນ ໃຫ້ອຸບັດຂຶ້ນດ້ວຍດີ ໃຫ້ຕັ້ງຂຶ້ນ ໃຫ້ຕັ້ງຂຶ້ນດ້ວຍດີ ໃຫ້ບັງເກີດ ໃຫ້ບັງເກີດໂດຍຍິ່ງ ໃຫ້ເກີດ ໃຫ້ເກີດດ້ວຍດີ ມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນບາງພວກເຂົ້າສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ໄດ້ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ໃຫ້ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງອຸບັດຂຶ້ນ ໃຫ້ອຸບັດຂຶ້ນດ້ວຍດີ ໃຫ້ຕັ້ງຂຶ້ນ ໃຫ້ຕັ້ງຂຶ້ນດ້ວຍດີ ໃຫ້ບັງເກີດ ໃຫ້ບັງເກີດໂດຍຍິ່ງ ໃຫ້ເກີດ ໃຫ້ເກີດດ້ວຍດີ ມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໕໗] ສກ. ຄວາມຜ່ອງແຜ້ວ ຄວາມອອກຈາກນິໂຣທະສະມາບັດ ຜາກົດໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມຜ່ອງແຜ້ວ ຄວາມອອກຈາກສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ຜາກົດ ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວະຈີສັງຂານຂອງຜູ້ເຂົ້ານິໂຣທະສະມາບັດຢູ່ດັບໄປກ່ອນ ຕໍ່ຈາກນັ້ນ ກາຍສັງຂານຈຶ່ງດັບ ຕໍ່ຈາກນັ້ນ ຈິດສັງຂານຈຶ່ງດັບແມ່ນບໍ?

ປຣ. ແມ່ນ

ສກ. ວະຈີສັງຂານຂອງຜູ້ເຂົ້າສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງຢູ່ດັບໄປກ່ອນ ຕໍ່ຈາກນັ້ນ ກາຍສັງຂານຈຶ່ງດັບ ຕໍ່ຈາກນັ້ນ ຈິດຕະສັງຂານຈຶ່ງດັບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈິດຕະສັງຂານຂອງຜູ້ອອກຈາກນິໂຣທະສະມາບັດເກີດຂຶ້ນກ່ອນ ຕໍ່ຈາກນັ້ນ ກາຍສັງຂານຈຶ່ງເກີດ ຕໍ່ຈາກນັ້ນ ວະຈີສັງຂານຈຶ່ງເກີດແມ່ນບໍ?

ປຣ. ແມ່ນ

ສກ. ຈິດຕະສັງຂານຂອງຜູ້ອອກຈາກສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງເກີດຂຶ້ນກ່ອນ ຕໍ່ຈາກນັ້ນ ກາຍສັງຂານຈຶ່ງເກີດ ຕໍ່ຈາກນັ້ນ ວະຈີສັງຂານຈຶ່ງເກີດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຜັດສະທັງ ໓ ຄື (໑) ສູນຍະຕະຜັດສະ (໒) ອະນິມິດຕະຜັດສະ (໓) ອັບປະນິຫິຕະຜັດສະ ຍ່ອມຖືກຕ້ອງຜູ້ອອກຈາກນິໂຣດແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ຜັດສະທັງ ໓ ຄື (໑) ສູນຍະຕະຜັດສະ (໒) ອະນິມິດຕະຜັດສະ (໓) ອັບປະນິຫິຕະຜັດສະ ຍ່ອມຖືກຕ້ອງຜູ້ອອກຈາກສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແລ້ວແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈິດຂອງຜູ້ອອກຈາກນິໂຣທະສະມາບັດແລ້ວ ຍ່ອມນ້ອມໄປສູ່ວິເວກ ອຽງໄປສູ່ວິເວກ ໂອນໄປສູ່ວິເວກແມ່ນບໍ?

ປຣ. ແມ່ນ

ສກ. ຈິດຂອງຜູ້ອອກຈາກສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ແລ້ວຍ່ອມນ້ອມໄປສູ່ວິເວກ ອຽງໄປສູ່ວິເວກ ໂອນໄປສູ່ວິເວກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໕໙] ປຣ. ທ່ານບໍ່ຍອມຮັບວ່າ "ນິໂຣທະສະມາບັດເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ" ແມ່ນບໍ?

ສກ. ແມ່ນ

ປຣ. ນິໂຣທະສະມາບັດເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ດັ່ງນັ້ນ ນິໂຣທະສະມາບັດຈຶ່ງເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ

**ນິໂຣທະສະມາບັດຕິກະຖາ ຈົບ**

# ๙. ອາກາສະກະຖາ (໘໗)
## ວ່າດ້ວຍອາກາດ

[໘໙໐] ສກ. ອາກາດເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ (ເປັນອະສັງຂະຕະ)ແມ່ນບໍ?

ປຣ. ແມ່ນ

ສກ. ອາກາດເປັນນິບພານ ເປັນບ່ອນຕ້ານທານ ເປັນບ່ອນເຊື່ອງ ເປັນບ່ອນເພິ່ງ ເປັນບ່ອນໝາຍ ເປັນບ່ອນໝັ້ນ ເປັນອຳມະຕະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອາກາດເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ນິບພານກໍເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງມີ ໒ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງມີ ໒ ຢ່າງແມ່ນບໍ?

ປຣ. ແມ່ນ

ສກ. ບ່ອນຕ້ານທານມີ ໒ ຢ່າງ ຯລຯ ຊ່ອງວ່າງແຫ່ງນິບພານມີ ໒ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອາກາດເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ມີບຸກຄົນບາງພວກເຮັດສິ່ງທີ່ບໍ່ແມ່ນອາກາດໃຫ້ເປັນອາກາດໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ມີບຸກຄົນບາງພວກເຮັດສະພາວະທຳທີ່ຖືກປັດໄຈປຸງແຕ່ງໃຫ້ເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ມີບຸກຄົນບາງພວກເຮັດອາກາດບໍ່ໃຫ້ເປັນອາກາດໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ມີບຸກຄົນບາງພວກເຮັດສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງໃຫ້ເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນອາກາດນົກທັງຫຼາຍບິນໄປໄດ້ ດວງຈັນແລະດວງອາທິດໂຄຈອນໄປໄດ້ ດວງດາວທັງຫຼາຍໂຄຈອນໄປໄດ້ ຜູ້ມີລິດທັງຫຼາຍສະແດງລິດໄດ້ ຊົນທັງຫຼາຍແກວ່ງແຂນໄດ້ ໂບກມື

ໄດ້ ດຶກກ້ອນດິນໄປໄດ້ ດຶກລູກຊຸບໄປໄດ້ ແຜງລິດໄດ້ ແຜງສອນໄປໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ໃນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ນົກທັງຫຼາຍບິນໄປໄດ້ ດວງຈັນ ແລະດວງອາທິດໂຄຈອນໄປໄດ້ ດວງດາວທັງຫຼາຍໂຄຈອນໄປໄດ້ ຜູ້ມີລິດທັງຫຼາຍສະແດງລິດໄດ້ ຊົນທັງຫຼາຍແກວ່ງແຂນໄດ້ ໂບກມືໄດ້ ດຶກກ້ອນດິນໄປໄດ້ ດຶກລູກຊຸບໄປໄດ້ ແຜງລິດໄດ້ ແຜງສອນໄປໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໙໑] ສກ. ຊົນທັງຫຼາຍລ້ອມອາກາດເຮັດໃຫ້ເປັນເຮືອນ ເຮັດໃຫ້ເປັນສາງໄດ້ ແມ່ນບໍ?

ປຣ. ແມ່ນ

ສກ. ຊົນທັງຫຼາຍລ້ອມສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ເຮັດໃຫ້ເປັນເຮືອນ ເຮັດໃຫ້ເປັນສາງໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອຂຸດນ້ຳສ້າງ ບ່ອນທີ່ບໍ່ແມ່ນອາກາດກໍກາຍເປັນອາກາດໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ຖືກປັດໄຈປຸງແຕ່ງ ກໍກາຍເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອຖົມບໍນ້ຳປ່າວ ບັນຈຸສາງປ່າວ ໝໍ້ປ່າວໃຫ້ເຕັມຢູ່ ອາກາດຫາຍໄປໄດ້ ແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງຫາຍໄປໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໙໔] ປຣ. ທ່ານບໍ່ຍອມຮັບວ່າ "ອາກາດເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ" ແມ່ນບໍ?

ສກ. ແມ່ນ

ປຣ. ອາກາດເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ດັ່ງນັ້ນ ອາກາດຈຶ່ງເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ

**ອາກາສະກະຖາ ຈົບ**

## ໗. ອາກາໂສສະນິທັດສະໂນຕິກະຖາ (໕໙)

### ວ່າດ້ວຍອາກາດເປັນສະພາວະທຳທີ່ເຫັນໄດ້

[໕໙໓] ສກ. ອາກາດເປັນສະພາວະທຳທີ່ເຫັນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ອາກາດເປັນຮູບ ເປັນຮູປາຍະຕະນະ ເປັນຮູບທາດ ເປັນສີຂຽວ ສີເຫຼືອງ ສີແດງ ສີຂາວ ເປັນຂອບເຂດແຫ່ງຈັກຂຸວິນຍານ ກະທົບທີ່ຈັກຂຸ ມາສູ່ຄອງຈັກຂຸໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອາກາດເປັນສະພາວະທຳທີ່ເຫັນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນອາໄສຈັກຂຸແລະອາກາດ ຈຶ່ງເກີດຈັກຂຸວິນຍານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຍ້ອນອາໄສຈັກຂຸແລະອາກາດ ຈຶ່ງເກີດຈັກຂຸວິນຍານແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ວ່າ "ຍ້ອນອາໄສຈັກຂຸແລະອາກາດຈຶ່ງເກີດຈັກຂຸວິນຍານ" ມີຢູ່ຈິງບໍ?

ປຣ. ບໍ່ມີ

ສກ. ພຣະສູດທີ່ວ່າ "ຍ້ອນອາໄສຈັກຂຸແລະຮູບຈຶ່ງເກີດຈັກຂຸວິນຍານ" ມີຢູ່ຈິງແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະສູດວ່າ "ຍ້ອນອາໄສຈັກຂຸແລະຮູບ ຈຶ່ງເກີດຈັກຂຸວິນຍານ" ມີຢູ່ຈິງ ທ່ານກໍບໍ່ຄວນຍອມຮັບວ່າ "ຍ້ອນອາໄສຈັກຂຸແລະອາກາດ ຈຶ່ງເກີດຈັກຂຸວິນຍານ"

[໕໙໔] ປຣ. ທ່ານບໍ່ຍອມຮັບວ່າ "ອາກາດເປັນສະພາວະທຳທີ່ເຫັນໄດ້" ແມ່ນບໍ?

ສກ. ແມ່ນ

ປຣ. ທ່ານເຫັນຊ່ອງຂອງຕົ້ນໄມ້ ໔ ຕົ້ນ ຊ່ອງເສົາ ໔ ຕົ້ນ ຊ່ອງລູກດານ ຊ່ອງໜ້າຕ່າງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກທ່ານເຫັນຊ່ອງຂອງຕົ້ນໄມ້ ໔ ຕົ້ນ ຊ່ອງເສົາ ໔ ຕົ້ນ ຊ່ອງລູກດານ ຊ່ອງໜ້າຕ່າງໄດ້ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ອາກາດເປັນສະພາວະທຳທີ່ເຫັນໄດ້"

**ໂອກາໂສສະນິທັດສະໂນຕິກະຖາ ຈົບ**

# ໗. ປະຖະວີທາຕຸສະນິທັດສະນາຕິອາທິກະຖາ (໖໐)

## ວ່າດ້ວຍປະຖະວີທາດເປັນສະພາວະທຳທີ່ເຫັນໄດ້ ເປັນຕົ້ນ

[໔໖໕] ສກ. ປະຖະວີທາດເປັນສະພາວະທຳທີ່ເຫັນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ປະຖະວີທາດເປັນຮູບ ເປັນຮູປາຍະຕະນະ ເປັນຮູບທາດ ເປັນສີຂຽວ ສີເຫຼືອງ ສີແດງ ສີຂາວ ເປັນຂອບເຂດແຫ່ງຈັກຂຸວິນຍານ ກະທົບຈັກຂຸ ມາສູ່ຄອງຈັກຂຸໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ປະຖະວີທາດເປັນສະພາວະທຳທີ່ເຫັນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນອາໄສຈັກຂຸແລະປະຖະວີທາດ ຈຶ່ງເກີດຈັກຂຸວິນຍານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຍ້ອນອາໄສຈັກຂຸແລະປະຖະວີທາດ ຈຶ່ງເກີດຈັກຂຸວິນຍານແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ວ່າ “ຍ້ອນອາໄສຈັກຂຸແລະປະຖະວີທາດ ຈຶ່ງເກີດຈັກຂຸວິນຍານ” ມີຢູ່ຈິງບໍ?

ປຣ. ບໍ່ມີ

ສກ. ພຣະສູດທີ່ວ່າ “ຍ້ອນອາໄສຈັກຂຸແລະຮູບ ຈຶ່ງເກີດຈັກຂຸວິນຍານ” ມີຢູ່ຈິງແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະສູດທີ່ວ່າ “ຍ້ອນອາໄສຈັກຂຸແລະຮູບ ຈຶ່ງເກີດຈັກຂຸວິນຍານ” ມີຢູ່ຈິງ ທ່ານກໍບໍ່ຄວນຍອມຮັບວ່າ “ຍ້ອນອາໄສຈັກຂຸແລະປະຖະວີທາດ ຈຶ່ງເກີດຈັກຂຸວິນຍານ”

[໔໖໖] ປຣ. ທ່ານບໍ່ຍອມຮັບວ່າ “ປະຖະວີທາດເປັນສະພາວະທຳທີ່ເຫັນໄດ້” ແມ່ນບໍ?

ສກ. ແມ່ນ

ປຣ. ທ່ານເຫັນແຜ່ນດິນ ແຜ່ນຫີນ ພູເຂົາບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກທ່ານເຫັນແຜ່ນດິນ ແຜ່ນຫີນ ພູເຂົາ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ “ປະຖະວີທາດເປັນສະພາວະທຳທີ່ເຫັນໄດ້”

ປຣ. ທ່ານບໍ່ຍອມຮັບວ່າ “ອາໂປທາດເປັນສະພາວະທຳທີ່ເຫັນໄດ້” ແມ່ນບໍ?

ສກ. ແມ່ນ

ປຣ. ທ່ານເຫັນນ້ຳບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກທ່ານເຫັນນໍ້າໄດ້ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ອາໂປທາດເປັນສະພາວະທຳທີ່ເຫັນໄດ້"

ປຣ. ທ່ານບໍ່ຍອມຮັບວ່າ "ເຕໂຊທາດເປັນສະພາວະທຳທີ່ເຫັນໄດ້" ແມ່ນບໍ?

ສກ. ແມ່ນ

ປຣ. ທ່ານເຫັນໄຟທີ່ລຸກຮຸ່ງຢູ່ບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກທ່ານເຫັນໄຟທີ່ລຸກຮຸ່ງຢູ່ໄດ້ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ ເຕໂຊທາດເປັນສະພາວະທຳທີ່ເຫັນໄດ້"

ປຣ. ທ່ານບໍ່ຍອມຮັບວ່າ "ວາໂຍທາດເປັນສະພາວະທຳທີ່ເຫັນໄດ້" ແມ່ນບໍ?

ສກ. ແມ່ນ

ປຣ. ທ່ານເຫັນຕົ້ນໄມ້ທີ່ຖືກລົມພັດໃຫ້ໂຍກເຍກຢູ່ບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກທ່ານເຫັນຕົ້ນໄມ້ທີ່ຖືກລົມພັດໃຫ້ໂຍກເຍກຢູ່ໄດ້ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ວາໂຍທາດເປັນສະພາວະທຳທີ່ເຫັນໄດ້"

**ປະຖະວີທາຕຸສະນິທັດສະນາຕິອາທິກະຖາ ຈົບ**

## ໙. ຈັກຂຸນທະຣິຍັງສະນິທັດສະນັນຕິອາທິກະຖາ (໖໑)

## ວ່າດ້ວຍຈັກຂຸນຊີເປັນສະພາວະທຳທີ່ເຫັນໄດ້ ເປັນຕົ້ນ

[໔໖໗] ສກ. ຈັກຂຸນຊີເປັນສະພາວະທຳທີ່ເຫັນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂຸນຊີເປັນຮູບ ເປັນຮູປາຍະຕະນະ ເປັນຮູບທາດ ຯລຯ ມາສູ່ຄອງຈັກຂຸໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈັກຂຸນຊີເປັນສະພາວະທຳທີ່ເຫັນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນອາໄສຈັກຂຸແລະຈັກຂຸນຊີ ຈຶ່ງເກີດຈັກຂຸວິນຍານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຍ້ອນອາໄສຈັກຂຸແລະຈັກຂຸນຊີ ຈຶ່ງເກີດຈັກຂຸວິນຍານແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ວ່າ "ຍ້ອນອາໄສຈັກຂຸແລະຈັກຂຸນຊີ ຈຶ່ງເກີດຈັກຂຸວິນຍານ" ມີຢູ່ຈິງບໍ?

ປຣ. ບໍ່ມີ

ສກ. ພຣະສູດທີ່ວ່າ "ຍ້ອນອາໄສຈັກຂຸແລະຮູບ ຈຶ່ງເກີດຈັກຂຸວິນຍານ" ມີຢູ່ຈິງແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະສູດທີ່ວ່າ "ຍ້ອນອາໄສຈັກຂຸແລະຮູບ ຈຶ່ງເກີດຈັກຂຸວິນຍານ" ມີຢູ່ຈິງ ທ່ານກໍບໍ່ຄວນຍອມຮັບວ່າ "ຍ້ອນອາໄສຈັກຂຸແລະຈັກຂຸນຊີ ຈຶ່ງເກີດຈັກຂຸວິນຍານ"

[໔໗໘] ປຣ. ທ່ານບໍ່ຍອມຮັບວ່າ "ອິນຊີ ໕ ເປັນສະພາວະທຳທີ່ເຫັນໄດ້" ແມ່ນບໍ?

ສກ. ແມ່ນ

ປຣ. ທ່ານເຫັນຈັກຂຸ ໂສຕະ ຄານະ ຊິວຫາ ກາຍບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກທ່ານເຫັນຈັກຂຸ ໂສຕະ ຄານະ ຊິວຫາ ກາຍ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ອິນຊີ ໕ ເປັນສະພາວະທຳທີ່ເຫັນໄດ້"

**ຈັກຂຸນທະຣິຍັງສະນິທັດສະນັນຕິອາທິກະຖາ ຈົບ**

# ໑໐. ກາຍະກຳມັງສະນິທັດສະນັນຕິກະຖາ (໗໘)

## ວ່າດ້ວຍກາຍຍະກຳເປັນສະພາວະທຳທີ່ເຫັນໄດ້

[໔໗໙] ສກ. ກາຍຍະກຳເປັນສະພາວະທຳທີ່ເຫັນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ກາຍຍະກຳ ເປັນຮູບ ເປັນຮູປາຍະຕະນະ ເປັນຮູບທາດ ເປັນສີຂຽວ ສີເຫຼືອງ ສີແດງ ສີຂາວ ເປັນຂອບເຂດແຫ່ງຈັກຂຸວິນຍານ ກະທົບທີ່ຈັກຂຸ ມາສູ່ຄອງຈັກຂຸໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກາຍຍະກຳເປັນສະພາວະທຳທີ່ເຫັນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນອາໄສຈັກຂຸແລະກາຍຍະກຳ ຈຶ່ງເກີດຈັກຂຸວິນຍານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຍ້ອນອາໄສຈັກຂຸແລະກາຍຍະກຳ ຈຶ່ງເກີດຈັກຂຸວິນຍານແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ວ່າ "ຍ້ອນອາໄສຈັກຂຸແລະກາຍຍະກຳ ຈຶ່ງເກີດຈັກຂຸວິນຍານ" ມີຢູ່ຈິງບໍ?

ປຣ. ບໍ່ມີ

ສກ. ພຣະສູດທີ່ວ່າ "ຍ້ອນອາໄສຈັກຂຸແລະຮູບຈຶ່ງເກີດຈັກຂຸວິນຍານ" ມີຢູ່ຈິງແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະສູດທີ່ວ່າ "ຍ້ອນອາໄສຈັກຂຸແລະຮູບ ຈຶ່ງເກີດຈັກຂຸວິນຍານ" ມີຢູ່ຈິງ ທ່ານກໍບໍ່ຄວນຍອມຮັບວ່າ "ຍ້ອນອາໄສຈັກຂຸແລະກາຍຍະກຳ ຈຶ່ງເກີດຈັກຂຸວິນຍານ"

[໔໗໐] ປຣ. ທ່ານບໍ່ຍອມຮັບວ່າ "ກາຍຍະກຳເປັນສະພາວະທຳທີ່ເຫັນໄດ້" ແມ່ນບໍ?

ສກ. ແມ່ນ

ປຣ. ທ່ານເຫັນຜູ້ກ້າວໄປ ຖອຍກັບ ແລເບິ່ງ ແນ່ມເບິ່ງ ຄູ້ເຂົ້າ ຢຽດອອກບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກທ່ານເຫັນຜູ້ກ້າວໄປ ຖອຍກັບ ແລເບິ່ງ ແນ່ມເບິ່ງ ຄູ້ເຂົ້າ ຢຽດອອກ ດັ່ງນັ້ນ ທ່ານກໍຄວນຍອມຮັບວ່າ "ກາຍຍະກຳເປັນສະພາວະທຳທີ່ເຫັນໄດ້"

**ກາຍຍະກຳມັງສະນິທັດສະນັນຕິກະຖາ ຈົບ**

ເລື້ອງສຸດທ້າຍເພິ່ງຮູ້ວ່າ ເລີ່ມຕົ້ນແຕ່ປະຖະວີສະນິທັດສະນະຈົບເຖິງກາຍຍະກຳມະສະນິ

**ທັດສະນະສັດຖະວັກ ຈົບ**

## ລວມກະຖາທີ່ມີໃນວັກນີ້ ຄື

໑. ນິຍາມະກະຖາ
໒. ສັດຈະກະຖາ
໕. ນິໂຣທະສະມາປັດຕິກະຖາ
໗. ອາກາໂສສະນິທັດສະໂນຕິກະຖາ
໘. ປະຖະວີທາດສະນິທັດສະນາຕິອາທິກະຖາ
໙. ຈັກຂຸນທະຣິຍັງສະນິທັດສະນັນຕິອາທິກະຖາ
໑໐. ກາຍຍະກຳມັງສະນິທັດສະນັນຕິກະຖາ
໔. ປະຕິດຈະສະມຸບປາທະກະຖາ
໔. ອາຣຸບປະກະຖາ
໖. ອາກາສະກະຖາ

# ໗. ສັດຕະມະວັກ

## ໑. ສັງຄະຫິຕະກະຖາ (໕໖)

### ວ່າດ້ວຍສະພາວະທຳທີ່ສົງເຄາະເຂົ້າໄດ້

[໕໗໑] ສກ. ສະພາວະທຳບາງເຫຼົ່າທີ່ສົງເຄາະເຂົ້າໄດ້ກັບສະພາວະທຳບາງເຫຼົ່າບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳບາງເຫຼົ່າທີ່ສົງເຄາະເຂົ້າໄດ້ ຈັດເຂົ້າຫົວຂໍ້ໄດ້ ນັບເນື່ອງກັບສະພາວະທຳບາງເຫຼົ່າມີຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກສະພາວະທຳບາງເຫຼົ່າທີ່ສົງເຄາະເຂົ້າໄດ້ ຈັດເຂົ້າຫົວຂໍ້ໄດ້ ນັບເນື່ອງກັບສະພາວະທຳບາງເຫຼົ່າມີຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ສະພາວະທຳບາງເຫຼົ່າທີ່ສົງເຄາະເຂົ້າໄດ້ກັບສະພາວະທຳບາງເຫຼົ່າບໍ່ມີ"

ສກ. ຈັກຂາຍະຕະນະສົງເຄາະເຂົ້າໃນຂັນໃດ?

ປຣ. ສົງເຄາະເຂົ້າໃນຮູບຂັນ

ສກ. ຫາກຈັກຂາຍະຕະນະສົງເຄາະເຂົ້າໃນຮູບຂັນ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ຈັກຂາຍະຕະນະສົງເຄາະເຂົ້າໄດ້ກັບຮູບຂັນ"

ສກ. ໂສຕາຍະຕະນະ ฯລฯ ຄານາຍະຕະນະฯລฯ ຊິວຫາຍະຕະນະ ฯລฯ ກາຍາຍະຕະນະ ສົງເຄາະເຂົ້າໃນຂັນໃດ?

ປຣ. ສົງເຄາະເຂົ້າໃນຮູບຂັນ

ສກ. ຫາກກາຍາຍະຕະນະສົງເຄາະເຂົ້າໃນຮູບຂັນ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ກາຍາຍະຕະນະສົງເຄາະເຂົ້າກັບຮູບຂັນ"

ສກ. ຣູປາຍະຕະນະ ฯລฯ ສັດທາຍະຕະນະ ฯລฯ ຄັນທາຍະຕະນະ ฯລฯ ຣະສາຍະຕະນະ ฯລฯ ໂຜດຖັບພາຍະຕະນະສົງເຄາະເຂົ້າໃນຂັນໃດ?

ປຣ. ສົງເຄາະເຂົ້າໃນຮູບຂັນ

ສກ. ຫາກໂຜດຖັບພາຍະຕະນະສົງເຄາະເຂົ້າໃນຮູບຂັນ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ໂຜດຖັບພາຍະຕະນະສົງເຄາະເຂົ້າໄດ້ກັບຮູບຂັນ"

ສກ. ສຸກຂະເວທະນາສົງເຄາະເຂົ້າໃນຂັນໃດ?

ປຣ. ສົງເຄາະເຂົ້າໃນເວທະນາຂັນ

ສກ. ຫາກສຸກຂະເວທະນາສົງເຄາະເຂົ້າໃນເວທະນາຂັນ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ສຸກຂະເວທະນາສົງເຄາະເຂົ້າໄດ້ກັບເວທະນາຂັນ"

ສກ. ທຸກຂະເວທະນາ ຯລຯ ອະທຸກຂະມະສຸຂະເວທະນາສົງເຄາະເຂົ້າໃນຂັນໃດ?

ປຣ. ສົງເຄາະເຂົ້າໃນເວທະນາຂັນ

ສກ. ຫາກອະທຸກຂະມະສຸຂະເວທະນາສົງເຄາະເຂົ້າໃນເວທະນາຂັນ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ອະທຸກຂະມະສຸຂະເວທະນາສົງເຄາະເຂົ້າໄດ້ກັບເວທະນາຂັນ"

ສກ. ສັນຍາທີ່ເກີດຈາກຈັກຂຸສຳຜັດ ສົງເຄາະເຂົ້າໃນຂັນໃດ?

ປຣ. ສົງເຄາະເຂົ້າໃນສັນຍາຂັນ

ສກ. ຫາກສັນຍາທີ່ເກີດຈາກຈັກຂຸສຳຜັດສົງເຄາະເຂົ້າໃນສັນຍາຂັນ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ສັນຍາທີ່ເກີດຈາກຈັກຂຸສຳຜັດສົງເຄາະເຂົ້າໄດ້ກັບສັນຍາຂັນ"

ສກ. ສັນຍາທີ່ເກີດຈາກໂສຕະສຳຜັດ ຯລຯ ສັນຍາທີ່ເກີດຈາກມະໂນສຳຜັດສົງເຄາະເຂົ້າໃນຂັນໃດ?

ປຣ. ສົງເຄາະເຂົ້າໃນສັນຍາຂັນ

ສກ. ຫາກສັນຍາທີ່ເກີດຈາກມະໂນສຳຜັດສົງເຄາະເຂົ້າໃນສັນຍາຂັນ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ສັນຍາທີ່ເກີດຈາກມະໂນສຳຜັດສົງເຄາະເຂົ້າໄດ້ກັບສັນຍາຂັນ"

ສກ. ເຈຕະນາທີ່ເກີດຈາກຈັກຂຸສຳຜັດ ຯລຯ ເຈຕະນາທີ່ເກີດຈາກມະໂນສຳຜັດສົງເຄາະເຂົ້າໃນຂັນໃດ?

ປຣ. ສົງເຄາະເຂົ້າໃນສັງຂານຂັນ

ສກ. ຫາກເຈຕະນາທີ່ເກີດຈາກມະໂນສຳຜັດສົງເຄາະເຂົ້າໃນສັງຂານຂັນ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ເຈຕະນາທີ່ເກີດຈາກມະໂນສຳຜັດສົງເຄາະເຂົ້າໄດ້ກັບສັງຂານຂັນ"

ສກ. ຈັກຂຸວິນຍານ ຯລຯ ມະໂນວິນຍານ ສົງເຄາະເຂົ້າໃນຂັນໃດ?

ປຣ. ສົງເຄາະເຂົ້າໃນວິນຍານຂັນ

ສກ. ຫາກມະໂນວິນຍານສົງເຄາະເຂົ້າໃນວິນຍານຂັນ ດັ່ງນັ້ນ ທ່ານຈຶ່ງຄວນ ຍອມຮັບວ່າ "ມະໂນວິນຍານສົງເຄາະເຂົ້າໄດ້ກັບວິນຍານຂັນ"

[໔໗໔] ປຣ. ສະພາວະທຳເຫຼົ່ານັ້ນສົງເຄາະເຂົ້າໄດ້ກັບສະພາວະທຳເຫຼົ່ານັ້ນເໝືອນຢ່າງຄູ່ງົວພະລິພັດເຂົາຮ້ອຍໄວ້ດ້ວຍສາຍທາມຫຼືເຊືອກ ເໝືອນບິນທະບາດເຂົາແຂວນໄວ້ດ້ວຍສາແຫຼກ ຫຼືເໝືອນໝາເຂົາຜູກໄວ້ດ້ວຍເຊືອກຜູກໝາ

ສກ. ຫາກຄູ່ງົວພະລິພັດເຂົາຮ້ອຍໄວ້ດ້ວຍສາຍທາມຫຼືເຊືອກ ບິນທະບາດແຂວນໄວ້ດ້ວຍສາແຫຼກ ຫຼືໝາເຂົາຜູກໄວ້ດ້ວຍເຊືອກຜູກໝາ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ສະພາວະທຳບາງເຫຼົ່າສົງເຄາະເຂົ້າໄດ້ກັບສະພາວະທຳບາງເຫຼົ່າມີຢູ່"

**ສັງຄະຫິຕະກະຖາ ຈົບ**

# ໘. ສຳປະຍຸດຕະກະຖາ (໗໘)

## ວ່າດ້ວຍສຳປະຍຸດຕະທຳ

[໘໗໓] ສກ. ສະພາວະທຳບາງເຫຼົ່າທີ່ສຳປະຍຸດດ້ວຍສະພາວະທຳບາງເຫຼົ່າບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳບາງເຫຼົ່າທີ່ປະກອບ ເກີດຮ່ວມ ຜະສົມ ເກີດພ້ອມກັນ ດັບພ້ອມກັນ ມີວັດຖຸແນວດຽວກັນ ມີອາລົມແນວດຽວກັນກັບສະພາວະທຳບາງເຫຼົ່າມີຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກສະພາວະທຳບາງເຫຼົ່າທີ່ປະກອບ ເກີດຮ່ວມ ຜະສົມ ເກີດພ້ອມກັນ ດັບພ້ອມກັນ ມີວັດຖຸແນວດຽວກັນ ມີອາລົມແນວດຽວກັນກັບສະພາວະທຳບາງເຫຼົ່າມີຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ສະພາວະທຳບາງເຫຼົ່າທີ່ສຳປະຍຸດດ້ວຍສະພາວະທຳບາງເຫຼົ່າບໍ່ມີ"

ສກ. ເວທະນາຂັນເກີດຮ່ວມກັບສັນຍາຂັນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຫາກເວທະນາຂັນເກີດຮ່ວມກັບສັນຍາຂັນໄດ້ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ເວທະນາຂັນສຳປະຍຸດດ້ວຍສັນຍາຂັນ"

ສກ. ເວທະນາຂັນເກີດຮ່ວມກັບສັງຂານຂັນ (ແລະ) ວິນຍານຂັນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຫາກເວທະນາຂັນເກີດຮ່ວມກັບວິນຍານຂັນໄດ້ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ເວທະນາຂັນສຳປະຍຸດດ້ວຍວິນຍານຂັນ"

ສກ. ສັນຍາຂັນ ຯລຯ ສັງຂານຂັນ ຯລຯ ວິນຍານຂັນ ເກີດຮ່ວມກັບເວທະນາຂັນ ຯລຯ ສັນຍາຂັນ ຯລຯ ສັງຂານຂັນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຫາກວິນຍານຂັນເກີດຮ່ວມກັບສັງຂານຂັນໄດ້ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ວິນຍານຂັນສຳປະຍຸດດ້ວຍສັງຂານຂັນ"

[໘໗໘] ປຣ. ສະພາວະທຳເຫຼົ່ານັ້ນແຊກຊຶມຢູ່ກັບສະພາວະທຳເຫຼົ່ານັ້ນ ເໝືອນນ້ຳມັນຊຶມຊັບຢູ່ໃນເມັດງາ ນ້ຳອ້ອຍຊຶມຊັບຢູ່ໃນຕົ້ນອ້ອຍແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

**ສຳປະຍຸດຕະກະຖາ ຈົບ**

# ໓. ເຈຕະສິກກະຖາ (໗໘)

## ວ່າດ້ວຍເຈຕະສິກ

[໘໗໘] ສກ. ສະພາວະທຳທີ່ເປັນເຈຕະສິກບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳບາງເຫຼົ່າທີ່ປະກອບ ເກີດຮ່ວມ ຜະສົມ ສຳປະຍຸດ ເກີດພ້ອມກັນ ດັບພ້ອມກັນ ມີວັດຖຸແນວດຽວກັນ ມີອາລົມແນວດຽວກັນກັບຈິດມີຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກສະພາວະທຳບາງເຫຼົ່າທີ່ປະກອບ ເກີດຮ່ວມ ຜະສົມ ສຳປະຍຸດ ເກີດພ້ອມກັນ ດັບພ້ອມກັນ ມີວັດຖຸແນວດຽວກັນ ມີອາລົມແນວດຽວກັນກັບຈິດມີຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ສະພາວະທຳທີ່ເປັນເຈຕະສິກບໍ່ມີ"

ສກ. ຜັດສະເກີດຮ່ວມກັບຈິດແມ່ນບໍ?

ປຣ. ແມ່ນ

ສກ. ຫາກຜັດສະເກີດຮ່ວມກັບຈິດດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ຜັດສະເປັນເຈຕະສິກ"

ສກ. ເວທະນາ ฯລฯ ສັນຍາ ฯລฯ ເຈຕະນາ ฯລฯ ສັດທາ ฯລฯ ວິຣິຍະ ฯລฯ ສະຕິ ฯລฯ ສະມາທິ ฯລฯ ປັນຍາ ฯລฯ ຣາຄະ ฯລฯ ໂທສະ ฯລฯ ໂມຫະ ฯລฯ ອະໂນດຕັບປະເກີດຮ່ວມກັບຈິດແມ່ນບໍ?

ປຣ. ແມ່ນ

ສກ. ຫາກອະໂນດຕັບປະເກີດຮ່ວມກັບຈິດ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ອະໂນດຕັບປະເປັນເຈຕະສິກ"

[໘໗໙] ປຣ. ຍ້ອນທ່ານເຂົ້າໃຈວ່າ "ສະພາວະທຳເກີດຮ່ວມກັບຈິດ" ຈຶ່ງຍອມຮັບວ່າ "ສະພາວະທຳເປັນເຈຕະສິກ" ແມ່ນບໍ?

ສກ. ແມ່ນ

ປຣ. ຍ້ອນທ່ານເຂົ້າໃຈວ່າ "ສະພາວະທຳເກີດຮ່ວມກັບຜັດສະ" ຈຶ່ງຍອມຮັບວ່າສະພາວະທຳເປັນຜັດສິກະ" ແມ່ນບໍ?

ສກ. ແມ່ນ

ປຣ. ຍ້ອນທ່ານເຂົ້າໃຈວ່າ "ສະພາວະທຳເກີດຮ່ວມກັບຈິດ" ຈຶ່ງຍອມຮັບວ່າສະພາວະທຳເປັນເຈຕະສິກ" ແມ່ນບໍ?

ສກ. ແມ່ນ

ປຣ. ຍ້ອນທ່ານເຂົ້າໃຈວ່າ "ສະພາວະທຳເກີດຮ່ວມກັບເວທະນາ ຯລຯ ເກີດຮ່ວມກັບສັນຍາ ຯລຯ ເກີດຮ່ວມກັບເຈຕະນາ ຯລຯ ເກີດຮ່ວມກັບສັດທາ ຯລຯ ເກີດຮ່ວມກັບວິຣິຍະ ຯລຯ ເກີດຮ່ວມກັບສະຕິ ຯລຯ ເກີດຮ່ວມກັບສະມາທິ ຯລຯ ເກີດຮ່ວມກັບປັນຍາ ຯລຯ ເກີດຮ່ວມກັບຣາຄະ ຯລຯ ເກີດຮ່ວມກັບໂທສະ ຯລຯ ເກີດຮ່ວມກັບໂມຫະ ຯລຯ ເກີດຮ່ວມກັບອະໂນດັບປະ" ຈຶ່ງຍອມຮັບວ່າ "ສະພາວະທຳເປັນອະໂນດັບປາສິກະ" ແມ່ນບໍ?

ສກ. ແມ່ນ

[໒໗໗] ສກ. ສະພາວະທຳທີ່ເປັນເຈຕະສິກບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ຈິດນີ້ແລະສະພາວະທຳທີ່ເປັນເຈຕະສິກ
ຍ່ອມຜາກົດແກ່ຜູ້ຮູ້ຊັດແຈ້ງແລ້ວໂດຍຄວາມເປັນອະນັດຕາ
ເມື່ອຮູ້ຊັດແຈ້ງສະພາວະທຳທັງ ໒ ນັ້ນ ທັງທີ່ຫຍາບແລະປະນີດ
ຈຶ່ງເປັນຜູ້ມີຄວາມເຫັນໂດຍຊອບ ຮູ້ຊັດແຈ້ງວ່າມີຄວາມແຕກດັບເປັນທຳມະດາ"

ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ສະພາວະທຳທີ່ເປັນເຈຕະສິກຈຶ່ງມີຢູ່

ສກ. ສະພາວະທຳທີ່ເປັນເຈຕະສິກບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ເກວັດຕະ ພິກຂຸໃນທຳວິໄນນີ້ ຍ່ອມທາຍຈິດ ທາຍເຈຕະສິກ ທາຍວິຕົກວິຈານ ຂອງສັດອື່ນ ໆ ຂອງບຸກຄົນອື່ນ ໆ ວ່າ ໃຈຂອງທ່ານເປັນແບບນີ້ ໃຈຂອງທ່ານເປັນໄປໂດຍອາການແບບນີ້ ຄວາມຄິດຂອງທ່ານເປັນດັ່ງນີ້" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ສະພາວະທຳທີ່ເປັນເຈຕະສິກຈຶ່ງມີຢູ່

**ເຈຕະສິກກະຖາ ຈົບ**

# ໔. ທານະກະຖາ (໖໖)

## ວ່າດ້ວຍທານ

[໔໗໘] ສກ. ສະພາວະທຳທີ່ເປັນເຈຕະສິກເປັນທານໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຈະໃຫ້ສະພາວະທຳທີ່ເປັນເຈຕະສິກແກ່ຄົນອື່ນ ໆ ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈະໃຫ້ສະພາວະທຳທີ່ເປັນເຈຕະສິກແກ່ຄົນອື່ນ ໆ ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຈະໃຫ້ຜັດສະແກ່ຄົນອື່ນ ໆ ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈະໃຫ້ເວທະນາ ຯລຯ ສັນຍາ ຯລຯ ເຈຕະນາ ຯລຯ ສັດທາ ຯລຯ ວິຣິຍະ ຯລຯ ສະຕິ ຯລຯ ສະມາທິ ຯລຯ ປັນຍາ ແກ່ຄົນອື່ນ ໆ ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໗໙] ປຣ. ທ່ານບໍ່ຍອມຮັບວ່າ "ສະພາວະທຳທີ່ເປັນເຈຕະສິກເປັນທານໄດ້" ແມ່ນບໍ?

ສກ. ແມ່ນ

ປຣ. ທານມີຜົນບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈ ມີຜົນຮ້ອນຮົນ ມີທຸກເປັນກຳໄລ ມີທຸກເປັນວິບາກແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ທານມີຜົນໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ມີຜົນເຢືອກເຢັນ ມີສຸກເປັນກຳໄລ ມີສຸກເປັນວິບາກບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກທານມີຜົນໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ມີຜົນເຢືອກເຢັນ ມີສຸກເປັນກຳໄລ ມີສຸກເປັນວິບາກ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ສະພາວະທຳທີ່ເປັນເຈຕະສິກເປັນທານໄດ້"

ສກ. ທານ ພຣະຜູ້ມີພຣະພາກເຈົ້າຕັດວ່າມີຜົນໜ້າປາຖະໜາ ຈີວອນເປັນທານ ແມ່ນບໍ?

ປຣ. ແມ່ນ

ສກ. ຈີວອນມີຜົນໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ມີຜົນເຢືອກເຢັນ ມີສຸກເປັນກຳໄລ ມີສຸກເປັນວິບາກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ທານ ພຣະຜູ້ມີພຣະພາກເຈົ້າຕັດວ່າມີຜົນໜ້າປາຖະໜາ ບິນທະບາດ ເສນາສະນະ ຄິລານະປັດໄຈເພສັດບໍຣິຂານເປັນທານ ແມ່ນບໍ?

ປຣ. ແມ່ນ

ສກ. ຄິລານະປັດໄຈເພສັດບໍຣິຂານມີຜົນໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ມີຜົນເຢືອກເຢັນ ມີສຸກເປັນກຳໄລ ມີສຸກເປັນວິບາກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໗໐] ປຣ. ທ່ານບໍ່ຍອມຮັບວ່າ "ສະພາວະທຳທີ່ເປັນເຈຕະສິກເປັນທານໄດ້" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ທຳເຫຼົ່ານີ້ ຄື ສັດທາ ຫິຣິ
ແລະທານທີ່ເປັນກຸສົນ ອັນສັດຕະບຸຣຸດດຳເນີນຕາມແລ້ວ
ສັດຕະບຸຣຸດທັງຫຼາຍກ່າວວ່າທຳ ໓ ປະການນີ້
ເປັນທາງໄປສູ່ເທວະໂລກ
ຍ້ອນທຳ ໓ ປະການນີ້ແລ ບຸກຄົນຈຶ່ງໄປສູ່ເທວະໂລກໄດ້"
ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ສະພາວະທຳທີ່ເປັນເຈຕະສິກຈຶ່ງເປັນທານໄດ້

ປຣ. ທ່ານບໍ່ຍອມຮັບວ່າ "ສະພາວະທຳທີ່ເປັນເຈຕະສິກເປັນທານໄດ້" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ທານ ໕ ປະການນີ້ເປັນມະຫາທານທີ່ຮູ້ກັນວ່າລ້ຳເລີດ ຮູ້ກັນມາດົນນານ ຮູ້ກັນວ່າເປັນອະຣິຍະວົງ ເປັນຂອງເກົ່າໃນອະດີດບໍ່ຖືກລຶບລ້າງແລ້ວ ບໍ່ເຄີຍຖືກລຶບລ້າງ ໃນປັດຈຸບັນບໍ່ຖືກລຶບລ້າງ ໃນອະນາຄົດກໍຈັກບໍ່ຖືກລຶບລ້າງ ບໍ່ຖືກສະມະນະພາມຜູ້ຮູ້ຄັດຄ້ານ ທານ ໕ ປະການ ອັນໃດແດ່ ຄື

໑. ອະຣິຍະສາວົກໃນທຳວິໄນນີ້ ເປັນຜູ້ລະເວັ້ນຂາດຈາກການຂ້າສັດ ອະຣິຍະສາວົກ ຜູ້ເວັ້ນຂາດຈາກການຂ້າສັດແລ້ວ ຊື່ວ່າໃຫ້ຄວາມບໍ່ມີໄພ ໃຫ້ຄວາມບໍ່ມີເວນ ໃຫ້ຄວາມບໍ່ບຽດບຽນສັດທັງຫຼາຍ ບໍ່ມີປະມານ ຍ່ອມເປັນຜູ້ມີສ່ວນແຫ່ງຄວາມບໍ່ມີໄພ ຄວາມບໍ່ມີເວນ ຄວາມບໍ່ບຽດບຽນອັນບໍ່ມີປະມານ ນີ້ເປັນທານປະການທີ ໑ ເປັນມະຫາທານ ທີ່

ຮູ້ກັນວ່າລ້ຳເລີດ ຮູ້ກັນມາດົນນານ ຮູ້ກັນວ່າເປັນອະຣິຍະວົງ ເປັນຂອງເກົ່າໃນອະດີດ ບໍ່ຖືກລຶບລ້າງບໍ່ເຄີຍຖືກລຶບລ້າງ ໃນປັດຈຸບັນບໍ່ຖືກລຶບລ້າງ ແລະໃນອະນາຄົດກໍຈັກບໍ່ຖືກລຶບລ້າງ ບໍ່ຖືກສະມະນະພາມຜູ້ຮູ້ຄັດຄ້ານ

໔. ອະຣິຍະສາວົກເປັນຜູ້ລະເວັ້ນຂາດຈາກການລັກຊັບ ຯລຯ

໓. ອະຣິຍະສາວົກເປັນຜູ້ລະເວັ້ນຂາດຈາກການປະພຶດຜິດໃນກາມ ຯລຯ

໔. ອະຣິຍະສາວົກເປັນຜູ້ລະເວັ້ນຂາດຈາກການເວົ້າຕົວະ ຯລຯ

໕. ອະຣິຍະສາວົກເປັນຜູ້ລະເວັ້ນຂາດຈາກການເສບຂອງມຶນເມົາຄືສຸຣາ ແລະເມໄຣ ອັນເປັນເຫດແຫ່ງຄວາມຜະໝາດ ອະຣິຍະສາວົກຜູ້ເວັ້ນຂາດຈາກການເສບຂອງມຶນເມົາຄືສຸຣາແລະເມໄຣ ອັນເປັນເຫດແຫ່ງຄວາມຜະໝາດ ຊື່ວ່າໃຫ້ຄວາມບໍ່ມີໄພ ໃຫ້ຄວາມບໍ່ມີເວນ ໃຫ້ຄວາມບໍ່ບຽດບຽນສັດທັງຫຼາຍບໍ່ມີປະມານ ນີ້ເປັນທານ ປະການທີ ໕ ເປັນມະຫາທານທີ່ຮູ້ກັນວ່າລ້ຳເລີດ ຮູ້ກັນມາດົນນານ ຮູ້ກັນວ່າ ເປັນອະຣິຍະວົງ ເປັນຂອງເກົ່າ ໃນອະດີດບໍ່ຖືກລຶບລ້າງແລ້ວ ບໍ່ເຄີຍຖືກລຶບລ້າງ ໃນປັດຈຸບັນບໍ່ຖືກລຶບລ້າງ ໃນອະນາຄົດກໍຈັກບໍ່ຖືກລຶບລ້າງ ບໍ່ຖືກສະມະນະພາມຜູ້ຮູ້ຄັດຄ້ານ

ພິກຂຸທັງຫຼາຍ ທານ ໕ ປະການນີ້ ຈັດເປັນມະຫາທານ ທີ່ຮູ້ກັນວ່າລ້ຳເລີດ ຮູ້ກັນມາດົນນານ ຮູ້ກັນວ່າເປັນອະຣິຍະວົງ ເປັນຂອງເກົ່າ ໃນອະດີດບໍ່ຖືກລຶບລ້າງແລ້ວ ບໍ່ເຄີຍຖືກລຶບລ້າງ ໃນປັດຈຸບັນບໍ່ຖືກລຶບລ້າງ ໃນອະນາຄົດກໍຈັກບໍ່ຖືກລຶບລ້າງ ບໍ່ຖືກສະມະນະພາມຜູ້ຮູ້ຄັດຄ້ານ" ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ສະພາວະທຳທີ່ເປັນເຈຕະສິກຈຶ່ງເປັນທານ

[໔໗໑] ສກ. ທ່ານບໍ່ຍອມຮັບວ່າ "ໄທຍະທຳເປັນທານໄດ້" ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ບຸກຄົນບາງຄົນໃນໂລກນີ້ ຍ່ອມໃຫ້ເຂົ້າ ນ້ຳ ຜ້າ ຍານ ດອກໄມ້ ຂອງຫອມ ເຄື່ອງລູບທາ ບ່ອນນອນ ບ່ອນພັກ ເຄື່ອງປະທີບ" ມີຢູ່ຈິງ ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ໄທຍະທຳຈຶ່ງເປັນທານໄດ້

[໔໗໔] ປຣ. ໄທຍະທຳເປັນທານໄດ້ແມ່ນບໍ?

ສກ. ແມ່ນ

ປຣ. ໄທຍະທຳມີຜົນໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ມີຜົນເຢືອກເຢັນ ມີສຸກເປັນກຳໄລ ມີສຸກເປັນວິບາກແມ່ນບໍ?

ສກ. ບໍ່ຄວນກ່າວແບບນັ້ນ ຯລຯ

ປຣ. ທານ ພຣະຜູ້ມີພຣະພາກເຈົ້າຕັດວ່າມີຜົນໜ້າປາຖະໜາ ຈີວອນເປັນທານ ແມ່ນບໍ?

ສກ. ແມ່ນ

ປຣ. ຈີວອນມີຜົນທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ມີຜົນເຢືອກເຢັນ ມີສຸກເປັນກຳໄລ ມີສຸກເປັນວິບາກແມ່ນບໍ?

ສກ. ບໍ່ຄວນກ່າວແບບນັ້ນ ຯລຯ

ປຣ. ທານ ພຣະຜູ້ມີພຣະພາກເຈົ້າຕັດວ່າມີຜົນໜ້າປາຖະໜາ ບິນທະບາດ ເສນາສະນະ ຄິລານະປັດໄຈເພສັດບໍຣິຂານເປັນທານແມ່ນບໍ?

ສກ. ແມ່ນ

ປຣ. ຄິລານະປັດໄຈເພສັດບໍຣິຂານມີຜົນໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ມີຜົນເຢືອກເຢັນ ມີສຸກເປັນກຳໄລ ມີສຸກເປັນວິບາກແມ່ນບໍ?

ສກ. ບໍ່ຄວນກ່າວແບບນັ້ນ ຯລຯ

ປຣ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ “ໄທຍະທຳເປັນທານໄດ້”

**ທານະກະຖາ ຈົບ**

# ໕. ປະຣິໂພຄະມະຍະປຸນຍະກະຖາ (ຜກ)

## ວ່າດ້ວຍບຸນສຳເລັດດ້ວຍການບໍຣິໂພກ

[໔໗໓] ສກ. ບຸນທີ່ສຳເລັດດ້ວຍການບໍຣິໂພກ ຈະເລີນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຜັດສະ ເວທະນາ ສັນຍາ ເຈຕະນາ ຈິດ ສັດທາ ວິຣິຍະ ສະຕິ ສະມາທິ ປັນຍາ ທີ່ສຳເລັດດ້ວຍການບໍຣິໂພກ ຈະເລີນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

ສກ. ບຸນທີ່ສຳເລັດດ້ວຍການບໍຣິໂພກ ຈະເລີນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຈະເລີນໄດ້ເໝືອນເຄືອເຂົາ ເໝືອນເຄືອຍ່ານຊາຍ ເໝືອນຕົ້ນໄມ້ ເໝືອນຫຍ້າ ເໝືອນກອງຫຍ້າປ້ອງແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

[໔໗໔] ສກ. ບຸນທີ່ສຳເລັດດ້ວຍການບໍຣິໂພກ ຈະເລີນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທາຍົກຖວາຍທານແລ້ວບໍ່ໃຝ່ໃຈ ທານນັ້ນເປັນບຸນແມ່ນບໍ?

ປຣ. ແມ່ນ

ສກ. ທານຂອງຜູ້ບໍ່ນຶກເຖິງ ຜູ້ບໍ່ຂວນຂວາຍ ຜູ້ບໍ່ສົນໃຈ ຜູ້ບໍ່ໃຝ່ໃຈ ຜູ້ບໍ່ຈິງໃຈ ຜູ້ບໍ່ຕ້ອງການ ຜູ້ບໍ່ປາຖະໜາ ເປັນບຸນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ທານຂອງຜູ້ນຶກເຖິງ ຜູ້ຂວນຂວາຍ ຜູ້ສົນໃຈ ຜູ້ໃຝ່ໃຈ ຜູ້ຈິງໃຈ ຜູ້ຕ້ອງການ ຜູ້ປາຖະໜາ ເປັນບຸນບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກທານຂອງຜູ້ນຶກເຖິງ ຜູ້ຂວນຂວາຍ ຜູ້ສົນໃຈ ຜູ້ໃຝ່ໃຈ ຜູ້ຈິງໃຈ ຜູ້ຕ້ອງການ ຜູ້ປາຖະໜາ ເປັນບຸນ ທ່ານກໍບໍ່ຄວນຍອມຮັບວ່າ "ບຸນທີ່ສຳເລັດດ້ວຍການບໍຣິໂພກຈະເລີນໄດ້"

[໔໗໕] ສກ. ບຸນທີ່ສຳເລັດດ້ວຍການບໍຣິໂພກ ຈະເລີນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທາຍົກຖວາຍທານແລ້ວ ນຶກເຖິງການວິຕົກ ພະຍາບາດວິຕົກ ວິຫິງສາວິຕົກທານນັ້ນເປັນບຸນແມ່ນບໍ?

ປຣ. ແມ່ນ

ສກ. ມີການປະຊຸມແຫ່ງຜັດສະ ໒ ຢ່າງ ຯລຯ ຈິດ ໒ ດວງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ມີການປະຊຸມແຫ່ງຜັດສະ ໒ ຢ່າງ ຯລຯ ຈິດ ໒ ດວງແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ເປັນກຸສົນແລະອະກຸສົນ ທີ່ມີໂທດແລະບໍ່ມີໂທດ ທີ່ຊົ່ວແລະປະນີດ ທີ່ເປັນຝ່າຍດຳ ເປັນຝ່າຍຂາວແລະເປັນຝ່າຍມີສ່ວນປຽບ ມາປະຊຸມກັນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທັງທີ່ເປັນກຸສົນແລະອະກຸສົນ ທີ່ມີໂທດແລະບໍ່ມີໂທດ ທີ່ຊົ່ວແລະປະນີດ ທີ່ເປັນຝ່າຍດຳ ເປັນຝ່າຍຂາວແລະເປັນຝ່າຍມີສ່ວນປຽບ ມາປະຊຸມກັນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ສິ່ງທີ່ຢູ່ຫ່າງໄກກັນຫຼາຍແທ້ ໔ ຢ່າງນີ້ ສິ່ງທີ່ຢູ່ຫ່າງໄກກັນຫຼາຍແທ້ ໔ ຢ່າງ ອັນໃດແດ່ ຄື

໑. ທ້ອງຟ້າກັບແຜ່ນດິນ ນີ້ເປັນສິ່ງທີ່ຢູ່ຫ່າງໄກກັນຫຼາຍຢ່າງທີ ໑

໒. ຝັ່ງນີ້ກັບຝັ່ງນັ້ນຂອງທະເລ ນີ້ເປັນສິ່ງທີ່ຢູ່ຫ່າງໄກກັນຫຼາຍຢ່າງທີ ໒

໓. ຈຸດທີ່ດວງອາທິດຂຶ້ນກັບຈຸດທີ່ດວງອາທິດຕົກ ນີ້ເປັນສິ່ງທີ່ຢູ່ຫ່າງໄກກັນຫຼາຍຢ່າງທີ ໓

໔. ທຳຂອງສັດຕະບຸຣຸດ (ຄົນດີ) ກັບທຳຂອງອະສັດຕະບຸຣຸດ (ຄົນຊົ່ວ) ນີ້ເປັນສິ່ງທີ່ຢູ່ຫ່າງໄກກັນຫຼາຍຢ່າງທີ ໔

ພິກຂຸທັງຫຼາຍ ສິ່ງທີ່ຢູ່ຫ່າງໄກກັນ ໔ ຢ່າງນີ້ແລ
ນັກປາດທັງຫຼາຍກ່າວວ່າ

ຟ້າກັບດິນຢູ່ໄກກັນ
ຝັ່ງ (ທັງ ໒) ຂອງທະເລຢູ່ໄກກັນ
ຈຸດທີ່ດວງອາທິດຂຶ້ນແລະຕົກກໍຢູ່ໄກກັນ
ບັດດິດກ່າວວ່າ ທຳຂອງສັດຕະບຸຣຸດ
ກັບທຳຂອງອະສັດຕະບຸຣຸດຢູ່ໄກກັນຍິ່ງກວ່ານັ້ນ

ສະມາຄົມຂອງສັດຕະບຸຣຸດຍັ່ງຍືນດົນນານ
ດຳລົງຢູ່ຕາບນານເທົ່ານານ
ສ່ວນສະມາຄົມຂອງອະສັດຕະບຸຣຸດຍ່ອມຈືດຈາງໄວ
ຍ້ອນແນວນັ້ນ ທຳຂອງສັດຕະບຸຣຸດ
ຈຶ່ງຫ່າງໄກກັນກັບທຳຂອງອະສັດຕະບຸຣຸດ"

ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ສະພາວະທຳທີ່ເປັນກຸສົນແລະອະກຸສົນທີ່ມີໂທດແລະບໍ່ມີໂທດ ທີ່ຊົ່ວແລະປະນີດ ທີ່ເປັນຝ່າຍດຳ ເປັນຝ່າຍຂາວແລະເປັນຝ່າຍມີສ່ວນປຽບມາປະຊຸມກັນໄດ້"

[໔໗໖] ປຣ. ທ່ານບໍ່ຍອມຮັບວ່າ "ບຸນທີ່ສຳເລັດດ້ວຍການບໍຣິໂພກຈະເລີນໄດ້"ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ຊົນເຫຼົ່າໃດປູກສວນອັນຣື່ນຣົມ ປູກປ່າ ສ້າງຂົວ
ຂຸດສະນ້ຳ ນ້ຳສ້າງ ແລະໃຫ້ບ່ອນພັກອາໄສ
ບຸນຍ່ອມຈະເລີນແກ່ຊົນເຫຼົ່ານັ້ນ
ທັງກາງເວັນແລະກາງຄືນ

ຊົນເຫຼົ່ານັ້ນດຳລົງຢູ່ໃນທຳ
ສົມບູນດ້ວຍສິນແລ້ວຍ່ອມເປັນຜູ້ໄປສູ່ສະຫວັນ

ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ບຸນທີ່ສຳເລັດດ້ວຍການບໍຣິໂພກຈຶ່ງຈະເລີນໄດ້

ປຣ. ທ່ານບໍ່ຍອມຮັບວ່າ "ບຸນທີ່ສຳເລັດດ້ວຍການບໍຣິໂພກ ຈະເລີນໄດ້" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ຫ້ວງບຸນກຸສົນ ໔ ປະການນີ້ ນຳສຸກມາໃຫ້ ເປັນໄປເພື່ອໃຫ້ໄດ້ອາລົມດີ ມີສຸກເປັນຜົນ ໃຫ້ເກີດໃນສະຫວັນ ເປັນໄປເພື່ອເກື້ອກູນ ເພື່ອະສຸກທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຫ້ວງບຸນກຸສົນ ໔ ປະການ ອັນໃດແດ່ ຄື

໑. ພິກຂຸໃຊ້ສອຍຈີວອນຂອງທາຍົກໃດ ບັນລຸເຈໂຕສະມາທິທີ່ປະມານບໍ່ໄດ້ຢູ່ ຫ້ວງບຸນກຸສົນຂອງທາຍົກນັ້ນປະມານບໍ່ໄດ້ ນຳສຸກມາໃຫ້ ເປັນໄປເພື່ອໃຫ້ໄດ້ອາລົມດີ ມີສຸກເປັນຜົນ ໃຫ້ເກີດໃນສະຫວັນ ເປັນໄປເພື່ອເກື້ອກູນ ເພື່ອສຸກທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ

໒. ພິກຂຸສັນບິນທະບາດຂອງທາຍົກໃດ ຯລຯ

໓. ພິກຂຸໃຊ້ສອຍເສນາສະນະຂອງທາຍົກໃດ ຯລຯ

໔. ພິກຂຸບໍຣິໂພກຄິລານະປັດໄຈເພສັດບໍຣິຂານຂອງທາຍົກໃດ ບັນລຸເຈໂຕສະມາທິ ທີ່ປະມານບໍ່ໄດ້ຢູ່ ຫ້ວງບຸນກຸສົນຂອງທາຍົກນັ້ນຫາປະມານບໍ່ໄດ້ ນຳສຸກມາໃຫ້ ເປັນໄປເພື່ອໃຫ້ໄດ້ອາລົມດີ ມີສຸກເປັນຜົນ ໃຫ້ເກີດໃນສະຫວັນ ເປັນໄປເພື່ອເກື້ອກູນ ເພື່ອສຸກທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ

ພິກຂຸທັງຫຼາຍ ຫ້ວງບຸນກຸສົນ ໔ ປະການນີ້ແລ ນຳສຸກມາໃຫ້ ເປັນໄປເພື່ອໃຫ້ໄດ້ອາລົມດີ ມີສຸກເປັນຜົນ ໃຫ້ເກີດໃນສະຫວັນ ເປັນໄປເພື່ອເກື້ອກູນ ເພື່ອສຸກທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ" ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ບຸນທີ່ສຳເລັດດ້ວຍການບໍຣິໂພກ ຈຶ່ງຈະເລີນໄດ້

[໔໗໗] ສກ. ບຸນທີ່ສຳເລັດດ້ວຍການບໍຣິໂພກ ຈະເລີນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທາຍົກຖວາຍທານ ປະຕິຄາຫົກຮັບທານແລ້ວບໍ່ບໍຣິໂພກ ຖິ້ມສາ ສະລະສາ

ທານນັ້ນເປັນບຸນແມ່ນບໍ?

ປຣ. ແມ່ນ

ສກ. ຫາກທາຍົກຖວາຍທານ ປະຕິຄາຫົກຮັບທານແລ້ວບໍ່ບໍຣິໂພກ ຖິ້ມສາ ສະລະສາ ທານນັ້ນເປັນບຸນ ທ່ານກໍບໍ່ຄວນຍອມຮັບວ່າ "ບຸນທີ່ສຳເລັດດ້ວຍການບໍຣິໂພກ ຈະເລີນໄດ້"

ສກ. ບຸນທີ່ສຳເລັດດ້ວຍການບໍຣິໂພກ ຈະເລີນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທາຍົກຖວາຍທານ ເມື່ອປະຕິຄາຫົກຮັບທານແລ້ວ ພຣະຣາຊາຊົງຢຶດໄປສາ ໂຈນລັກໄປ ໄຟໄໝ້ ນ້ຳພັດໄປ ຫຼື ທາຍາດຜູ້ບໍ່ເປັນທີ່ຮັກກັນນຳໄປສາ ທານນັ້ນເປັນບຸນແມ່ນບໍ?

ປຣ. ແມ່ນ

ສກ. ຫາກທາຍົກຖວາຍທານ ເມື່ອປະຕິຄາຫົກຮັບທານແລ້ວ ພຣະຣາຊາຊົງຢຶດໄປສາ ໂຈນລັກໄປ ໄຟໄໝ້ ນ້ຳພັດໄປ ຫຼື ທາຍາດຜູ້ບໍ່ເປັນທີ່ຮັກກັນນຳໄປສາ ທານນັ້ນເປັນບຸນ ທ່ານກໍບໍ່ຄວນຍອມຮັບວ່າ "ບຸນທີ່ສຳເລັດດ້ວຍການບໍຣິໂພກຈະເລີນໄດ້"

**ປະຣິໂພຄະມະຍະປຸນຍະກະຖາ ຈົບ**

## ໖. ອິໂຕທິນນະກະຖາ (໖໗)
## ວ່າດ້ວຍທານທີ່ບຸກຄົນອຸທິດໃຫ້ຈາກໂລກນີ້

[໔໗໗] ສກ. ເຜດທັງຫຼາຍດຳລົງຊີບໃນເປຕະໂລກນັ້ນ ດ້ວຍທານທີ່ບຸກຄົນອຸທິດໃຫ້ຈາກໂລກນີ້ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ໃນເປຕະໂລກນັ້ນ ເຜດທັງຫຼາຍໃຊ້ສອຍຈີວອນທີ່ບຸກຄົນອຸທິດໃຫ້ຈາກໂລກນີ້ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນເປຕະໂລກນັ້ນ ເຜດທັງຫຼາຍບໍຣິໂພກບິນທະບາດ ເສນາສະນະ ຄິລານະປັດໄຈເພສັດບໍຣິຂານ ຂອງຂົບຫຍ້ຳ ຂອງກິນ ຂອງດື່ມ ທີ່ບຸກຄົນອຸທິດໃຫ້ຈາກໂລກນີ້ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເຜດທັງຫຼາຍດຳລົງຊີບໃນເປຕະໂລກນັ້ນ ດ້ວຍທານທີ່ບຸກຄົນອຸທິດໃຫ້ຈາກໂລກນີ້ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນໜຶ່ງກະທຳໃຫ້ອີກບຸກຄົນໜຶ່ງ ສຸກແລະທຸກມີຜູ້ອື່ນເປັນຕົວການ ບຸກຄົນໜຶ່ງກະທຳ ອີກບຸກຄົນໜຶ່ງສະເຫວີຍແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໗໙] ປຣ. ທ່ານບໍ່ຍອມຮັບວ່າ "ເຜດທັງຫຼາຍດຳລົງຊີບໃນເປຕະໂລກນັ້ນ ດ້ວຍທານທີ່ບຸກຄົນອຸທິດໃຫ້ຈາກໂລກນີ້ໄດ້" ແມ່ນບໍ?

ສກ. ແມ່ນ

ປຣ. ເຜດທັງຫຼາຍອະນຸໂມທະນາທານທີ່ເຂົາອຸທິດໃຫ້ ເພື່ອປະໂຫຍດແກ່ຕົນ ເຮັດຈິດໃຫ້ເຫຼື້ອມໃສ ໃຫ້ເກີດປີຕິ ໄດ້ໂສມະນັດບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກເຜດທັງຫຼາຍອະນຸໂມທະນາທານທີ່ເຂົາອຸທິດໃຫ້ເພື່ອປະໂຫຍດແກ່ຕົນ ເຮັດຈິດ ໃຫ້ເຫຼື້ອມໃສ ໃຫ້ເກີດປີຕິ ໄດ້ໂສມະນັດ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ເຜດທັງຫຼາຍດຳລົງຊີບໃນເປຕະໂລກນັ້ນ ດ້ວຍທານທີ່ບຸກຄົນອຸທິດໃຫ້ຈາກໂລກນີ້ໄດ້"

[໔໘໐] ປຣ. ທ່ານບໍ່ຍອມຮັບວ່າ "ເຜດທັງຫຼາຍດຳລົງຊີບໃນເປຕະໂລກນັ້ນດ້ວຍທານ ທີ່ບຸກຄົນອຸທິດໃຫ້ຈາກໂລກນີ້ໄດ້" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ຝົນທີ່ຕົກລົງເທິງບ່ອນໂນນ ຍ່ອມໄຫຼໄປສູ່ບ່ອນລຸ່ມ ສັນໃດ
ທານທີ່ທາຍົກອຸທິດໃຫ້ຈາກມະນຸດໂລກນີ້
ຍ່ອມສຳເລັດຜົນແນ່ນອນແກ່ພວກເຜດ ສັນນັ້ນຄືກັນ
ຫ້ວງນ້ຳທີ່ເຕັມຍ່ອມຍັງສະມຸດສາຄອນໃຫ້ເຕັມປ່ຽມ ສັນໃດ
ທານທີ່ທາຍົກອຸທິດໃຫ້ຈາກມະນຸດໂລກນີ້
ຍ່ອມສຳເລັດຜົນແນ່ນອນແກ່ພວກເຜດ ສັນນັ້ນຄືກັນ
ໃນເຜດພູມນັ້ນ ບໍ່ມີກະສິກຳ ໂຄຣັກຂະກຳ
ພານິດກຳເຊັ່ນນັ້ນ (ແລະ) ການແລກປ່ຽນຊື້ຂາຍດ້ວຍເງິນ
ຜູ້ທີ່ຕາຍໄປເກີດເປັນເຜດໃນເຜດພູມນັ້ນ
ດຳລົງຊີບດ້ວຍຜົນທານທີ່ພວກຍາດພີ່ນ້ອງອຸທິດໃຫ້ຈາກມະນຸດໂລກນີ້"
ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ເຜດທັງຫຼາຍຈຶ່ງດຳລົງຊີບໃນເປຕະໂລກນັ້ນ ດ້ວຍທານທີ່ບຸກຄົນອຸທິດໃຫ້ຈາກໂລກນີ້ໄດ້

[໔໘໑] ປຣ. ທ່ານບໍ່ຍອມຮັບວ່າ "ເຜດທັງຫຼາຍດຳລົງຊີບໃນເປຕະໂລກນັ້ນ ດ້ວຍທານທີ່ບຸກຄົນອຸທິດໃຫ້ຈາກໂລກນີ້ໄດ້" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ມານດາບິດາເມື່ອເຫັນຖານະ ໕ ປະການນີ້ ຈຶ່ງປາຖະໜາບຸດຜູ້ເກີດໃນຕະກູນ

ຖານະ ໕ ປະການ ອັນໃດແດ່ ຄື

໑. ບຸດທີ່ເຮົາລ້ຽງມາແລ້ວຈັກລ້ຽງເຮົາ
໒. ບຸດຈັກຊ່ອຍເຮັດກິດຂອງເຮົາ
໓. ວົງຕະກູນຈັກດຳລົງຢູ່ໄດ້ດົນນານ
໔. ບຸດຈັກປະຕິບັດຕົນໃຫ້ສົມຄວນຮັບຊັບມໍລະດົກໄວ້
໕. ເມື່ອເຮົາທັງສອງຕາຍໄປ ບຸດຈັກທຳບຸນອຸທິດໃຫ້

ພິກຂຸທັງຫຼາຍ ມານດາບິດາເມື່ອເຫັນຖານະ ໕ ປະການນີ້ແລ ຈຶ່ງປາຖະໜາບຸດຜູ້ເກີດໃນຕະກູນ

ມານດາບິດາຜູ້ສະຫຼາດ
ເມື່ອເຫັນຖານະ ໕ ປະການຈຶ່ງປາຖະໜາບຸດ
ດ້ວຍຫວັງວ່າ ບຸດທີ່ເຮົາລ້ຽງແລ້ວຈັກລ້ຽງເຮົາ
ຈັກຊ່ອຍເຮັດກິດຂອງເຮົາ
ວົງຕະກູນຈັກດຳລົງຢູ່ໄດ້ດົນນານ
ຈັກປະຕິບັດຕົນໃຫ້ສົມຄວນແກ່ການຮັບຊັບມໍລະດົກ
ແລະເມື່ອເຮົາທັງສອງຕາຍແລ້ວຈັກທຳບຸນອຸທິດໃຫ້
ມານດາບິດາຜູ້ສະຫຼາດ
ເມື່ອເຫັນຖານະເຫຼົ່ານີ້ ຈຶ່ງປາຖະໜາບຸດ

ຍ້ອນແນວນັ້ນ ບຸດຜູ້ເປັນສັດຕະບຸຣຸດ ຜູ້ສະງົບ
ເປັນກະຕັນຍູກະຕະເວທີບຸກຄົນ
ເມື່ອຣະລຶກເຖິງຄຸນທ່ານທີ່ເຮັດໄວ້ຕໍ່ເຮົາກ່ອນ
ຈຶ່ງລ້ຽງມານດາບິດາ ຊ່ອຍເຮັດກິດຂອງທ່ານ
ເຊື່ອຟັງໂອວາດ ຕອບແທນພຣະຄຸນທ່ານ
ດຳລົງວົງຕະກູນສົມກັບທີ່ທ່ານເປັນບຸບພະກາຣີ
ບຸດຜູ້ມີສັດທາ ສົມບູນດ້ວຍສິນ
ຍ່ອມເປັນທີ່ສັນເສີນ"

ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ເຜດທັງຫຼາຍຊື່ວ່າຍ່ອມດຳລົງຊີບໃນເປຕະໂລກນັ້ນ ດ້ວຍທານທີ່ບຸກຄົນອຸທິດໃຫ້ຈາກໂລກນີ້ໄດ້

**ອິໂຕທິນນະກະຖາ ຈົບ**

## ໗. ປະຖະວີກຳມະວິປາໂກຕິກະຖາ (໖໙)

## ວ່າດ້ວຍແຜ່ນດິນເປັນກຳວິບາກ

[໔໙໔] ສກ. ແຜ່ນດິນເປັນກຳວິບາກແມ່ນບໍ?

ປຣ. ແມ່ນ

ສກ. ແຜ່ນດິນມີສຸກຂະເວທະນາ ມີທຸກຂະເວທະນາ ມີອະທຸກຂະມະສຸຂະເວທະນາ ສຳປະຍຸດດ້ວຍສຸກຂະເວທະນາ ສຳປະຍຸດດ້ວຍທຸກຂະເວທະນາ ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ສຳປະຍຸດດ້ວຍຜັດສະ ສຳປະຍຸດດ້ວຍເວທະນາ ສຳປະຍຸດດ້ວຍສັນຍາ ສຳປະຍຸດດ້ວຍເຈຕະນາ ສຳປະຍຸດດ້ວຍຈິດ ຮັບຮູ້ ອາລົມໄດ້ ມີຄວາມນຶກເຖິງ ມີຄວາມຜູກໃຈ ມີຄວາມສົນໃຈ ມີຄວາມໃຝ່ໃຈ ມີຄວາມຈົງໃຈ ມີຄວາມປາຖະໜາ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ฯลฯ

ສກ. ແຜ່ນດິນບໍ່ມີສຸກຂະເວທະນາ ບໍ່ມີທຸກຂະເວທະນາ ບໍ່ມີອະທຸກຂະມະສຸຂະເວທະນາ ບໍ່ສຳປະຍຸດດ້ວຍສຸກຂະເວທະນາ ບໍ່ສຳປະຍຸດດ້ວຍທຸກຂະເວທະນາ ບໍ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ

ບໍ່ສຳປະຍຸດດ້ວຍຜັດສະ ບໍ່ສຳປະຍຸດດ້ວຍເວທະນາ ບໍ່ສຳປະຍຸດດ້ວຍສັນຍາ ບໍ່ສຳປະຍຸດດ້ວຍເຈຕະນາ ບໍ່ສຳປະຍຸດດ້ວຍຈິດ ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ບໍ່ມີຄວາມຜູກໃຈ ບໍ່ມີຄວາມສົນໃຈ ບໍ່ມີຄວາມໃຝ່ໃຈ ບໍ່ມີຄວາມປາຖະໜາ ບໍ່ມີຄວາມຕັ້ງໃຈ ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກແຜ່ນດິນບໍ່ມີສຸກຂະເວທະນາ ບໍ່ມີທຸກຂະເວທະນາ ฯลฯ ຮັບຮູ້ອາລົມບໍ່ໄດ້ບໍ່ມີຄວາມນຶກເຖິງ ฯลฯ ບໍ່ມີຄວາມຕັ້ງໃຈ ທ່ານກໍບໍ່ຄວນຍອມຮັບວ່າ ແຜ່ນດິນເປັນກຳວິບາກ"

ສກ. ຜັດສະເປັນກຳວິບາກ ຜັດສະມີສຸກຂະເວທະນາ ມີທຸກຂະເວທະນາ ມີອະທຸກຂະມະສຸຂະເວທະນາ ສຳປະຍຸດດ້ວຍສຸກຂະເວທະນາ ສຳປະຍຸດດ້ວຍທຸກຂະເວທະນາ ฯลฯ ສຳປະຍຸດດ້ວຍອະທຸກຂະມະສຸກຂະເວທະນາ ສຳປະຍຸດດ້ວຍຜັດສະ ສຳປະຍຸດດ້ວຍເວທະນາ ສຳປະຍຸດດ້ວຍສັນຍາ ສຳປະຍຸດດ້ວຍເຈຕະນາ ສຳປະຍຸດດ້ວຍຈິດ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ฯลฯ ມີຄວາມຕັ້ງໃຈຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ແຜ່ນດິນເປັນກຳວິບາກ ແຜ່ນດິນມີສຸກຂະເວທະນາ ມີທຸກຂະເວທະນາ ມີອະທຸກຂົມສຸກຂະເວທະນາ ສຳປະຍຸດດ້ວຍສຸກຂະເວທະນາ ສຳປະຍຸດດ້ວຍທຸກຂະເວທະນາ ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ສຳປະຍຸດດ້ວຍຜັດສະ ສຳປະຍຸດດ້ວຍເວທະນາ ສຳປະຍຸດດ້ວຍສັນຍາ ສຳປະຍຸດດ້ວຍເຈຕະນາ ສຳປະຍຸດດ້ວຍຈິດ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ມີຄວາມຜູກໃຈ ມີຄວາມສົນໃຈ ມີຄວາມໃຝ່ໃຈ ມີຄວາມຈົງໃຈ ມີຄວາມປາຖະໜາ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ແຜ່ນດິນເປັນກຳວິບາກ (ແມ່ນວ່າ) ແຜ່ນດິນບໍ່ມີສຸກຂະເວທະນາ ບໍ່ມີທຸກຂະເວທະນາ ຯລຯ ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ຜັດສະເປັນກຳວິບາກ (ແມ່ນວ່າ) ຜັດສະບໍ່ມີສຸກຂະເວທະນາ ບໍ່ມີທຸກຂະເວທະນາ ຯລຯ ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ແຜ່ນດິນ ເປັນກຳວິບາກແມ່ນບໍ?

ປຣ. ແມ່ນ

ສກ. ແຜ່ນດິນ ເຂົ້າເຖິງການຍ້ອງຍໍແລະການລົງໂທດ ເຂົ້າເຖິງການຕັດແລະການທຳລາຍ ແມ່ນບໍ?

ປຣ. ແມ່ນ

ສກ. ກຳວິບາກ ເຂົ້າເຖິງການຍ້ອງຍໍແລະການລົງໂທດ ເຂົ້າເຖິງການຕັດແລະການທຳລາຍ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ແຜ່ນດິນບຸກຄົນຈະຊື້ຈະຂາຍ ຈະຈຳນອງ ຈະລວບລວມ ຈະສັ່ງສົມໄດ້ ແມ່ນບໍ?

ປຣ. ແມ່ນ

ສກ. ກຳວິບາກບຸກຄົນຈະຊື້ຈະຂາຍ ຈະຈຳນອງ ຈະລວບລວມ ຈະສັ່ງສົມໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໙໓] ສກ. ແຜ່ນດິນເປັນສົມບັດທົ່ວໄປແກ່ຄົນເຫຼົ່າອື່ນແມ່ນບໍ?

ປຣ. ແມ່ນ

ສກ. ກຳວິບາກ ເປັນສົມບັດທົ່ວໄປແກ່ຄົນເຫຼົ່າອື່ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກຳວິບາກ ເປັນສົມບັດທົ່ວໄປແກ່ຄົນເຫຼົ່າອື່ນແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ຂຸມຊັບຄືບຸນບໍ່ເປັນຂອງທົ່ວໄປແກ່ຄົນອື່ນ ໂຈນລັກໄປບໍ່ໄດ້
ສັດຜູ້ຈະຕ້ອງຕາຍເປັນທຳມະດາເພິ່ງທຳບຸນ
ຜູ້ນັ້ນແລເພິ່ງປະພຶດສຸດຈະຣິດ"

ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ກຳວິບາກເປັນສົມບັດທົ່ວໄປແກ່ຄົນອື່ນ"

ສກ. ແຜ່ນດິນເປັນກຳວິບາກແມ່ນບໍ?

ປຣ. ແມ່ນ

ສກ. ແຜ່ນດິນເກີດຂຶ້ນກ່ອນ ສັດທັງຫຼາຍຈຶ່ງເກີດຂຶ້ນໃນພາຍຫຼັງແມ່ນບໍ?

ປຣ. ແມ່ນ

ສກ. ວິບາກເກີດຂຶ້ນກ່ອນ ສັດທັງຫຼາຍຈຶ່ງເຮັດກຳເພື່ອວິບາກໃນພາຍຫຼັງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ແຜ່ນດິນເປັນກຳວິບາກຂອງສັບພະສັດແມ່ນບໍ?

ປຣ. ແມ່ນ

ສກ. ສັບພະສັດອາໄສແຜ່ນດິນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ສັບພະສັດອາໄສແຜ່ນດິນແມ່ນບໍ?

ປຣ. ແມ່ນ

ສກ. ສັດບາງພວກອາໄສແຜ່ນດິນແລ້ວປະຣິນິບພານມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ສັດບາງພວກໃຊ້ກຳວິບາກຍັງບໍ່ໝົດສິ້ນແລ້ວປະຣິນິບພານມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ແຜ່ນດິນເປັນກຳວິບາກຂອງພຣະເຈົ້າຈັກກະພັດແມ່ນບໍ?

ປຣ. ແມ່ນ

ສກ. ສັດເຫຼົ່າອື່ນກໍອາໄສແຜ່ນດິນແມ່ນບໍ?

ປຣ. ແມ່ນ

ສກ. ສັດເຫຼົ່າອື່ນອາໄສກຳວິບາກຂອງພຣະເຈົ້າຈັກກະພັດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ສັດເຫຼົ່າອື່ນອາໄສກຳວິບາກຂອງພຣະເຈົ້າຈັກກະພັດແມ່ນບໍ?

ປຣ. ແມ່ນ

ສກ. ສັດເຫຼົ່າອື່ນອາໄສຜັດສະ ເວທະນາ ສັນຍາ ເຈຕະນາ ຈິດ ສັດທາ ວິຣິຍະ ສະຕິ ສະມາທິ ປັນຍາ ຂອງພຣະເຈົ້າຈັກກະພັດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໔໙໔] ປຣ. ທ່ານບໍ່ຍອມຮັບວ່າ "ແຜ່ນດິນເປັນກຳວິບາກ" ແມ່ນບໍ?

ສກ. ແມ່ນ

ປຣ. ກຳທີ່ເປັນໄປເພື່ອຄວາມເປັນຜູ້ມີອຳນາດ ກຳທີ່ເປັນໄປເພື່ອຄວາມເປັນໃຫຍ່ໃນແຜ່ນດິນມີຢູ່ບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກກຳທີ່ເປັນໄປເພື່ອຄວາມເປັນຜູ້ມີອຳນາດ ກຳທີ່ເປັນໄປເພື່ອຄວາມເປັນໃຫຍ່ມີຢູ່ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ແຜ່ນດິນເປັນກຳວິບາກ"

**ປະຖະວີກຳມະວິປາໂກຕິກະຖາ ຈົບ**

# ໗. ຊະຣາມະຣະນັງວິປາໂກຕິກະຖາ (໑໐)

## ວ່າດ້ວຍຊະຣາມໍຣະນະເປັນວິບາກ

[໔໙໕] ສກ. ຊະຣາມໍຣະນະເປັນວິບາກແມ່ນບໍ?

ປຣ. ແມ່ນ

ສກ. ຊະຣາມໍຣະນະມີສຸກຂະເວທະນາ ມີທຸກຂະເວທະນາ ມີອະທຸກຂະມະສຸຂະເວທະນາ ສຳປະຍຸດດ້ວຍສຸກຂະເວທະນາ ສຳປະຍຸດດ້ວຍທຸກຂະເວທະນາ ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ສຳປະຍຸດດ້ວຍຜັດສະ ສຳປະຍຸດດ້ວຍເວທະນາ ສຳປະຍຸດດ້ວຍສັນຍາ ສຳປະຍຸດດ້ວຍເຈຕະນາ ສຳປະຍຸດດ້ວຍຈິດ ຮັບຮູ້ ອາລົມໄດ້ ມີຄວາມນຶກເຖິງ ມີຄວາມຜູກໃຈ ມີຄວາມສົນໃຈ ມີຄວາມໃຝ່ໃຈ ມີຄວາມຈົ່ງໃຈ ມີຄວາມປາຖະໜາ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຊະຣາມໍຣະນະບໍ່ມີສຸກຂະເວທະນາ ບໍ່ມີທຸກຂະເວທະນາ ฯລฯ ຮັບຮູ້ອາລົມບໍ່ໄດ້ ບໍ່ມີ ຄວາມນຶກເຖິງ ฯລฯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ຫາກຊະຣາມໍຣະນະບໍ່ມີສຸກຂະເວທະນາ ບໍ່ມີທຸກຂະເວທະນາ ฯລฯ ຮັບຮູ້ອາລົມບໍ່ໄດ້ບໍ່ມີຄວາມນຶກເຖິງ ฯລฯ ບໍ່ມີຄວາມຕັ້ງໃຈ ທ່ານກໍບໍ່ຄວນຍອມຮັບວ່າ "ຊະຣາມໍຣະນະເປັນວິບາກ"

ສກ. ຜັດສະເປັນວິບາກ ຜັດສະມີສຸກຂະເວທະນາ ມີທຸກຂະເວທະນາ ຯລຯ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ຊະຣາມໍຣະນະເປັນວິບາກ ຊະຣາມໍຣະນະມີສຸກຂະເວທະນາ ມີທຸກຂະເວທະນາ ຯລຯ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຊະຣາມໍຣະນະເປັນວິບາກ ຊະຣາມໍຣະນະບໍ່ມີສຸກຂະເວທະນາ ບໍ່ມີທຸກຂະເວທະນາ ຯລຯ ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ຜັດສະເປັນວິບາກ ຜັດສະບໍ່ມີສຸກຂະເວທະນາ ບໍ່ມີທຸກຂະເວທະນາ ຯລຯ ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໙໓] ສກ. ຊະຣາມໍຣະນະແຫ່ງສະພາວະທຳທີ່ເປັນອະກຸສົນ ກໍເປັນວິບາກແຫ່ງສະພາວະທຳທີ່ເປັນອະກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ຊະຣາມໍຣະນະແຫ່ງສະພາວະທຳທີ່ເປັນກຸສົນ ກໍເປັນວິບາກແຫ່ງສະພາວະທຳທີ່ເປັນກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຊະຣາມໍຣະນະແຫ່ງສະພາວະທຳທີ່ເປັນກຸສົນມີຢູ່ ທ່ານບໍ່ຍອມຮັບວ່າ "ເປັນວິບາກແຫ່ງສະພາວະທຳທີ່ເປັນກຸສົນ" ແມ່ນບໍ?

ປຣ. ແມ່ນ

ສກ. ຊະຣາມໍຣະນະແຫ່ງສະພາວະທຳທີ່ເປັນອະກຸສົນມີຢູ່ ທ່ານບໍ່ຍອມຮັບວ່າ "ເປັນວິບາກແຫ່ງສະພາວະທຳທີ່ເປັນອະກຸສົນ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຊະຣາມໍຣະນະແຫ່ງສະພາວະທຳທີ່ເປັນກຸສົນ ເປັນວິບາກແຫ່ງສະພາວະທຳທີ່ເປັນອະກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ຊະຣາມໍຣະນະແຫ່ງສະພາວະທຳທີ່ເປັນອະກຸສົນ ເປັນວິບາກແຫ່ງສະພາວະທຳທີ່ເປັນກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຊະຣາມໍຣະນະແຫ່ງສະພາວະທຳທີ່ເປັນອະກຸສົນມີຢູ່ ທ່ານບໍ່ຍອມຮັບວ່າ "ເປັນວິບາກແຫ່ງສະພາວະທຳທີ່ເປັນກຸສົນ" ແມ່ນບໍ?

ປຣ. ແມ່ນ

ສກ. ຊະຣາມໍຣະນະແຫ່ງສະພາວະທຳທີ່ເປັນກຸສົນມີຢູ່ ທ່ານບໍ່ຍອມຮັບວ່າ "ເປັນວິບາກແຫ່ງສະພາວະທຳທີ່ເປັນອະກຸສົນ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຊະຣາມໍຣະນະແຫ່ງສະພາວະທຳທີ່ເປັນກຸສົນແລະອະກຸສົນ ເປັນວິບາກແຫ່ງສະພາວະທຳທີ່ເປັນອະກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ຊະຣາມໍຣະນະແຫ່ງສະພາວະທຳທີ່ເປັນກຸສົນແລະອະກຸສົນ ເປັນວິບາກແຫ່ງສະພາວະທຳທີ່ເປັນກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຊະຣາມໍຣະນະແຫ່ງສະພາວະທຳທີ່ເປັນກຸສົນ ແລະອະກຸສົນມີຢູ່ ທ່ານບໍ່ຍອມຮັບວ່າ ເປັນວິບາກແຫ່ງສະພາວະທຳທີ່ເປັນກຸສົນ" ແມ່ນບໍ?

ປຣ. ແມ່ນ

ສກ. ຊະຣາມໍຣະນະແຫ່ງສະພາວະທຳທີ່ເປັນກຸສົນແລະອະກຸສົນມີຢູ່ ທ່ານບໍ່ຍອມຮັບວ່າ ເປັນວິບາກແຫ່ງສະພາວະທຳທີ່ເປັນອະກຸສົນ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໙໗] ປຣ. ທ່ານບໍ່ຍອມຮັບວ່າ "ຊະຣາມໍຣະນະເປັນວິບາກ" ແມ່ນບໍ?

ສກ. ແມ່ນ

ປຣ. ກຳທີ່ເປັນໄປເພື່ອຄວາມເປັນຜູ້ມີຜິວພັນໝົ່ນໝອງ ກຳທີ່ເປັນໄປເພື່ອຄວາມເປັນຜູ້ມີອາຍຸສັ້ນມີຢູ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກກຳທີ່ເປັນໄປເພື່ອຄວາມເປັນຜູ້ມີຜິວພັນໝົ່ນໝອງ ກຳທີ່ເປັນໄປເພື່ອຄວາມເປັນຜູ້ມີອາຍຸສັ້ນມີຢູ່ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ຊະຣາມໍຣະນະເປັນວິບາກ"

**ຊະຣາມະຣະນັງວິປາໂກຕິກະຖາ ຈົບ**

# ໗. ອະຣິຍະທຳມະວິປາກະກະຖາ (ກາ໑)

## ວ່າດ້ວຍວິບາກແຫ່ງອະຣິຍະທຳ

[໔໗໘] ສກ. ວິບາກແຫ່ງອະຣິຍະທຳບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ຄວາມເປັນສະມະນະມີຜົນຫຼາຍ ຄວາມເປັນພາມມີຜົນຫຼາຍ ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຄວາມເປັນສະມະນະມີຜົນຫຼາຍ ຄວາມເປັນພາມມີຜົນຫຼາຍ ທ່ານກໍບໍ່ຄວນຍອມຮັບວ່າ "ວິບາກແຫ່ງອະຣິຍະທຳບໍ່ມີ"

ສກ. ວິບາກແຫ່ງອະຣິຍະທຳບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ໂສດາປັດຕິຜົນມີຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກໂສດາປັດຕິຜົນມີຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ວິບາກແຫ່ງອະຣິຍະທຳບໍ່ມີ"

ສກ. ສະກະທາຄາມີຜົນ ຯລຯ ອະນາຄາມີຜົນ ຯລຯ ອະຣະຫັດຕະຜົນມີຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກອະຣະຫັດຕະຜົນມີຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ວິບາກແຫ່ງອະຣິຍະທຳບໍ່ມີ"

ສກ. ໂສດາປັດຕິຜົນບໍ່ເປັນວິບາກແມ່ນບໍ?

ປຣ. ແມ່ນ

ສກ. ຜົນແຫ່ງທານບໍ່ເປັນວິບາກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂສດາປັດຕິຜົນບໍ່ເປັນວິບາກແມ່ນບໍ?

ປຣ. ແມ່ນ

ສກ. ຜົນແຫ່ງສີນ ຯລຯ ຜົນແຫ່ງພາວະນາ ບໍ່ເປັນວິບາກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະກະທາຄາມີຜົນ ຯລຯ ອະນາຄາມີຜົນ ຯລຯ ອະຣະຫັດຕະຜົນບໍ່ເປັນວິບາກແມ່ນບໍ?

ປຣ. ແມ່ນ

ສກ. ຜົນແຫ່ງທານບໍ່ເປັນວິບາກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະຣະຫັດຕະຜົນບໍ່ເປັນວິບາກແມ່ນບໍ?

ປຣ. ແມ່ນ

ສກ. ຜົນແຫ່ງສີນ ຯລຯ ຜົນແຫ່ງພາວະນາ ບໍ່ເປັນວິບາກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຜົນແຫ່ງທານເປັນວິບາກແມ່ນບໍ?

ປຣ. ແມ່ນ

ສກ. ໂສດາປັດຕິຜົນເປັນວິບາກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຜົນແຫ່ງທານເປັນວິບາກແມ່ນບໍ?

ປຣ. ແມ່ນ

ສກ. ສະກະທາຄາມິຜົນ ຯລຯ ອະນາຄາມິຜົນ ຯລຯ ອະຣະຫັດຕະຜົນເປັນວິບາກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຜົນແຫ່ງສີນ ຯລຯ ຜົນແຫ່ງພາວະນາ ເປັນວິບາກແມ່ນບໍ?

ປຣ. ແມ່ນ

ສກ. ໂສດາປັດຕິຜົນເປັນວິບາກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຜົນແຫ່ງພາວະນາເປັນວິບາກແມ່ນບໍ?

ປຣ. ແມ່ນ

ສກ. ສະກະທາຄາມິຜົນ ຯລຯ ອະນາຄາມິຜົນ ຯລຯ ອະຣະຫັດຕະຜົນເປັນວິບາກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໙໙] ສກ. ກາມາວະຈອນກຸສົນມີວິບາກແມ່ນບໍ?

ປຣ. ແມ່ນ

ສກ. ໂລກຸດຕະຣະກຸສົນມີວິບາກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບປາວະຈອນກຸສົນ ຯລຯ ອະຮູບປາວະຈອນກຸສົນ ມີວິບາກແມ່ນບໍ?

ປຣ. ແມ່ນ

ສກ. ໂລກຸດຕະຣະກຸສົນມີວິບາກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂລກຸດຕະຣະກຸສົນບໍ່ມີວິບາກແມ່ນບໍ?

ປຣ. ແມ່ນ

ສກ. ກາມາວະຈອນກຸສົນບໍ່ມີວິບາກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂລກຸດຕະຣະກຸສົນບໍ່ມີວິບາກແມ່ນບໍ?

ປຣ. ແມ່ນ

ສກ. ຣູບປາວະຈອນກຸສົນ ຯລຯ ອະຣູບປາວະຈອນກຸສົນ ບໍ່ມີວິບາກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໕໐໐] ປຣ. ກາມາວະຈອນກຸສົນມີວິບາກ ເປັນສະພາວະທຳທີ່ເປັນເຫດໃຫ້ເຖິງຈຸຕິແລະປະຕິສົນທິແມ່ນບໍ?

ສກ. ແມ່ນ

ປຣ. ໂລກຸດຕະຣະກຸສົນມີວິບາກ ເປັນສະພາວະທຳທີ່ເປັນເຫດໃຫ້ເຖິງຈຸຕິ ແລະປະຕິສົນທິແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ຣູບປາວະຈອນກຸສົນ ຯລຯ ອະຣູບປາວະຈອນກຸສົນ ມີວິບາກ ເປັນສະພາວະທຳທີ່ເປັນເຫດໃຫ້ເຖິງຈຸຕິແລະປະຕິສົນທິແມ່ນບໍ?

ສກ. ແມ່ນ

ປຣ. ໂລກຸດຕະຣະກຸສົນມີວິບາກ ເປັນສະພາວະທຳທີ່ເປັນເຫດໃຫ້ເຖິງຈຸຕິແລະປະຕິສົນທິແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ໂລກຸດຕະຣະກຸສົນມີວິບາກເປັນສະພາວະທຳທີ່ເປັນເຫດໃຫ້ເຖິງນິບພານແມ່ນບໍ?

ສກ. ແມ່ນ

ປຣ. ກາມາວະຈອນກຸສົນມີວິບາກ ເປັນສະພາວະທຳທີ່ເປັນເຫດໃຫ້ເຖິງນິບພານແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ໂລກຸດຕະຣະກຸສົນມີວິບາກ ເປັນສະພາວະທຳທີ່ເປັນເຫດໃຫ້ເຖິງນິບພານແມ່ນບໍ?

ສກ. ແມ່ນ

ປຣ. ຣູບປາວະຈອນກຸສົນ ຯລຯ ອະຣູບປາວະຈອນກຸສົນ ມີວິບາກ ເປັນສະພາວະທຳທີ່ເປັນເຫດໃຫ້ເຖິງນິບພານ ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

**ອະຣິຍະທຳມະວິປາກະກະຖາ ຈົບ**

# ໑໐. ວິປາໂກວິປາກະທຳມະທຳໂມຕິກະຖາ (໗໘)

## ວ່າດ້ວຍວິບາກເປັນສະພາວະທຳທີ່ເປັນເຫດໃຫ້ເກີດວິບາກ

[໕໐໑] ສກ. ວິບາກເປັນສະພາວະທຳທີ່ເປັນເຫດໃຫ້ເກີດວິບາກແມ່ນບໍ?

ປຣ. ແມ່ນ

ສກ. ວິບາກແຫ່ງວິບາກນັ້ນ ເປັນສະພາວະທຳທີ່ເປັນເຫດໃຫ້ເກີດວິບາກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວິບາກແຫ່ງວິບາກນັ້ນ ເປັນສະພາວະທຳທີ່ເປັນເຫດໃຫ້ເກີດວິບາກແມ່ນບໍ?

ປຣ. ແມ່ນ

ສກ. ການເຮັດບ່ອນສຸດແຫ່ງທຸກບໍ່ມີ ການຕັດຂາດຈາກວັດຕະບໍ່ມີ ອະນຸປາທາປະຣິນິບພານກໍບໍ່ມີ ແກ່ວິບາກແຫ່ງວິບາກທີ່ເປັນສະພາວະທຳທີ່ເປັນເຫດໃຫ້ເກີດວິບາກທັງ ໘ ຊັ້ນດັ່ງກ່າວມານັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວິບາກເປັນສະພາວະທຳທີ່ເປັນເຫດໃຫ້ເກີດວິບາກແມ່ນບໍ?

ປຣ. ແມ່ນ

ສກ. ບັນຍັດວ່າວິບາກກັບສະພາວະທຳທີ່ເປັນເຫດໃຫ້ເກີດວິບາກ ຫຼື ບັນຍັດວ່າສະພາວະທຳທີ່ເປັນເຫດໃຫ້ເກີດວິບາກກັບວິບາກນີ້ນັ້ນ ມີຄວາມໝາຍແນວດຽວກັນ ສະເໝີກັນມີສ່ວນເທົ່າກັນ ມີສະພາບຄືກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວິບາກເປັນສະພາວະທຳທີ່ເປັນເຫດໃຫ້ເກີດວິບາກແມ່ນບໍ?

ປຣ. ແມ່ນ

ສກ. ວິບາກແລະສະພາວະທຳທີ່ເປັນເຫດແຫ່ງວິບາກ ສະພາວະທຳທີ່ເປັນເຫດແຫ່ງວິບາກ ແລະວິບາກປະກອບ ເກີດຮ່ວມ ຜະສົມ ສຳປະຍຸດ ເກີດພ້ອມກັນ ດັບພ້ອມກັນ ມີວັດຖຸແນວດຽວກັນ ມີອາລົມແນວດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວິບາກເປັນສະພາວະທຳທີ່ເປັນເຫດໃຫ້ເກີດວິບາກແມ່ນບໍ?

ປຣ. ແມ່ນ

ສກ. ອະກຸສົນກັບວິບາກແຫ່ງອະກຸສົນເປັນອັນດຽວກັນ ກຸສົນກັບວິບາກແຫ່ງກຸສົນເປັນອັນດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວິບາກເປັນສະພາວະທຳທີ່ເປັນເຫດໃຫ້ເກີດວິບາກແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຖືກໄໝ້ຢູ່ໃນນະຮົກດ້ວຍຈິດດວງທີ່ເປັນເຫດຂ້າສັດເທົ່ານັ້ນ ບັນເທີງຢູ່ໃນສະຫວັນກໍດ້ວຍຈິດດວງທີ່ເປັນເຫດໃຫ້ທານເທົ່ານັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໕໐໘] ປຣ. ທ່ານບໍ່ຍອມຮັບວ່າ "ວິບາກເປັນສະພາວະທຳທີ່ເປັນເຫດໃຫ້ເກີດວິບາກ" ແມ່ນບໍ?

ສກ. ແມ່ນ

ປຣ. ວິບາກຄືອະຣູບປະຂັນ ໔ ເປັນອັນຍະມັນຍະປັດໄຈບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກວິບາກ ຄື ອະຣູບປະຂັນ ໔ ເປັນອັນຍະມັນຍະປັດໄຈ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ວິບາກເປັນສະພາວະທຳທີ່ເປັນເຫດໃຫ້ເກີດວິບາກ"

**ວິປາໂກວິປາກະທຳມະທຳໂມຕິກະຖາ ຈົບ**

**ສັດຕະມະວັກ ຈົບ**

## ລວມກະຖາທີ່ມີໃນວັກນີ້ ຄື

໑. ສັງຄະຫິຕະກະຖາ
໒. ສຳປະຍຸດຕະກະຖາ
໓. ເຈຕະສິກກະຖາ
໔. ທານະກະຖາ
໕. ປະຣິໂພຄະມະຍະປຸນຍະກະຖາ
໖. ອິໂຕທິນນະກະຖາ
໗. ປະຖະວີກຳມະວິປາໂກຕິກະຖາ
໘. ຊະຣາມະຣະນັງວິປາໂກຕິກະຖາ
໙. ອະຣິຍະທຳມະວິປາກະກະຖາ
໑໐. ວິປາໂກວິປາກະທຳມະທຳໂມຕິກະຖາ

# ໗. ອັດຖະມະວັກ

## ໑. ສະກະຕິກະຖາ (ກຸສ)

### ວ່າດ້ວຍຄະຕິ ໖

[໔໐໓] ສກ. ຄະຕິມີ ໖ ແມ່ນບໍ?

ປຣ. ແມ່ນ

ສກ. ຄະຕິ ພຣະຜູ້ມີພຣະພາກເຈົ້າຕັດໄວ້ ໕ ຢ່າງ ຄື ນະຣົກ ກຳເນີດສັດເດຍຣັດສານ ພູມແຫ່ງເຜດ ມະນຸດ ເທວະດາບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຄະຕິພຣະຜູ້ມີພຣະພາກເຈົ້າຕັດໄວ້ ໕ ຢ່າງ ຄື ນະຣົກ ກຳເນີດເດຍຣັດສານ ພູມແຫ່ງເຜດ ມະນຸດ ເທວະດາ ທ່ານກໍບໍ່ຄວນຍອມຮັບວ່າ "ຄະຕິມີ ໖"

ສກ. ຄະຕິມີ ໖ ແມ່ນບໍ?

ປຣ. ແມ່ນ

ສກ. ອະສູນຈຳພວກກາລະກັນຊິກາ ມີຮູບຮ່າງຄືກັນ ມີການເສບກາມຄືກັນ ມີອາຫານຄືກັນ ມີອາຍຸຄືກັນກັບເຜດທັງຫຼາຍ ແລະແຕ່ງງານກັບເຜດທັງຫຼາຍ ໄດ້ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກອະສູນຈຳພວກກາລະກັນຊິກາ ມີຮູບຮ່າງຄືກັນ ມີການເສບກາມຄືກັນມີອາຫານຄືກັນ ມີອາຍຸຄືກັນກັບເຜດທັງຫຼາຍ ແລະແຕ່ງງານກັບເຜດທັງຫຼາຍໄດ້ ທ່ານກໍບໍ່ຄວນຍອມຮັບວ່າ "ຄະຕິມີ ໖"

ສກ. ຄະຕິມີ ໖ ແມ່ນບໍ?

ປຣ. ແມ່ນ

ສກ. ພວກອະສູນທີ່ເປັນບໍລິວານຂອງທ້າວເວປະຈິດຕິ ມີຮູບຮ່າງຄືກັນ ມີການເສບກາມຄືກັນ ມີອາຫານຄືກັນ ມີອາຍຸຄືກັນກັບເທວະດາທັງຫຼາຍ ແລະແຕ່ງງານກັບເທວະດາທັງຫຼາຍໄດ້ ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພວກອະສູນທີ່ເປັນບໍລິວານທ້າວເວປະຈິດຕິ ມີຮູບຮ່າງຄືກັນ ມີການເສບກາມຄືກັນ ມີອາຫານຄືກັນ ມີອາຍຸຄືກັນກັບເທວະດາທັງຫຼາຍ ແລະແຕ່ງງານກັບເທວະດາທັງຫຼາຍໄດ້ ທ່ານກໍບໍ່ຄວນຍອມຮັບວ່າ "ຄະຕິມີ ໖"

ສກ. ຄະຕິມີ ໖ ແມ່ນບໍ?

ປຣ. ແມ່ນ

ສກ. ພວກອະສູນທີ່ເປັນບໍລິວານຂອງທ້າວເວປະຈິດຕິເປັນເທວະດາມາກ່ອນບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພວກອະສູນທີ່ເປັນບໍລິວານຂອງທ້າວເວປະຈິດຕິເປັນເທວະດາມາກ່ອນ ທ່ານກໍບໍ່ຄວນຍອມຮັບວ່າ "ຄະຕິມີ ໖"

[໕໐໔] ປຣ. ທ່ານບໍ່ຍອມຮັບວ່າ "ຄະຕິມີ ໖" ແມ່ນບໍ?

ສກ. ແມ່ນ

ປຣ. ອະສຸຣະກາຍມີບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກອະສຸຣະກາຍມີ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ຄະຕິມີ ໖"

**ສະກະຕິກະຖາ ຈົບ**

## ໘. ອັນຕະຣາພະວະກະຖາ (ກ໘)

## ວ່າດ້ວຍອັນຕະຣະພົບ

[໕໐໕] ສກ. ອັນຕະຣະພົບ (ພົບທີ່ຢູ່ໃນລະຫວ່າງຕາຍກັບເກີດ) ມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ເປັນກາມະພົບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອັນຕະຣະພົບມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ເປັນຮູບພົບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອັນຕະຣະພົບມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ເປັນອະຣູບພົບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອັນຕະຣະພົບມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ອັນຕະຣະພົບມີຢູ່ໃນລະຫວ່າງກາມະພົບກັບຮູບພົບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອັນຕະຣະພົບມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ອັນຕະຣະພົບມີຢູ່ໃນລະຫວ່າງຣູບພົບກັບອະຣູບພົບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອັນຕະຣະພົບບໍ່ມີໃນລະຫວ່າງກາມະພົບກັບຣູບພົບແມ່ນບໍ?

ປຣ. ແມ່ນ

ສກ. ຫາກອັນຕະຣະພົບບໍ່ມີໃນລະຫວ່າງກາມະພົບກັບຣູບພົບ ທ່ານກໍບໍ່ຄວນຍອມຮັບວ່າ "ອັນຕະຣະພົບມີຢູ່"

ສກ. ອັນຕະຣະພົບບໍ່ມີໃນລະຫວ່າງຣູບພົບກັບອະຣູບພົບແມ່ນບໍ?

ປຣ. ແມ່ນ

ສກ. ຫາກອັນຕະຣະພົບບໍ່ມີໃນລະຫວ່າງຣູບພົບກັບອະຣູບພົບ ທ່ານກໍບໍ່ຄວນຍອມຮັບວ່າ "ອັນຕະຣະພົບມີຢູ່"

[໔໐໖] ສກ. ອັນຕະຣະພົບມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ອັນຕະຣະພົບນັ້ນຈັດເປັນກຳເນີດທີ ໕ ເປັນຄະຕິທີ ໖ ເປັນວິນຍານຖິຕິທີ ໘ ເປັນສັດຕາວາດທີ ໑໐ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອັນຕະຣະພົບມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ອັນຕະຣະພົບຈັດເປັນພົບ ເປັນຄະຕິ ເປັນສັດຕາວາດ ເປັນສັງສານ ເປັນກຳເນີດ ເປັນວິນຍານຖິຕິ ເປັນການໄດ້ອັດຕະພາບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກຳທີ່ໃຫ້ເຂົ້າເຖິງອັນຕະຣະພົບມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສັດຜູ້ເຂົ້າເຖິງອັນຕະຣະພົບມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອັນຕະຣະພົບມີສັດເກີດ ແກ່ ຕາຍ ຈຸຕິ ປະຕິສົນທິແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອັນຕະຣະພົບມີຣູບ ເວທະນາ ສັນຍາ ສັງຂານ ວິນຍານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອັນຕະຣະພົບເປັນພົບທີ່ມີຂັນ ໕ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໐໗] ສກ. ກາມະພົບມີຢູ່ ກາມະພົບເປັນພົບ ເປັນຄະຕິ ເປັນສັດຕາວາດ ເປັນສົງສານ ເປັນກຳເນີດ ເປັນວິນຍານຖິຕິ ເປັນການໄດ້ອັດຕະພາບແມ່ນບໍ?

ປຣ. ແມ່ນ

ສກ. ອັນຕະຣະພົບມີຢູ່ ອັນຕະຣະພົບເປັນພົບ ເປັນຄະຕິ ເປັນສັດຕາວາດ ເປັນສົງສານ ເປັນກຳເນີດ ເປັນວິນຍານຖິຕິ ເປັນການໄດ້ອັດຕະພາບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກຳທີ່ໃຫ້ເຂົ້າເຖິງກາມະພົບມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ກຳທີ່ໃຫ້ເຂົ້າເຖິງອັນຕະຣະພົບມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສັດຜູ້ເຂົ້າເຖິງກາມະພົບມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ສັດຜູ້ເຂົ້າເຖິງອັນຕະຣະພົບມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນກາມະພົບ ມີສັດເກີດ ແກ່ ຕາຍ ຈຸຕິ ປະຕິສົນທິແມ່ນບໍ?

ປຣ. ແມ່ນ

ສກ. ອັນຕະຣະພົບມີສັດເກີດ ແກ່ ຕາຍ ຈຸຕິ ປະຕິສົນທິແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນກາມະພົບ ມີຮູບ ເວທະນາ ສັນຍາ ສັງຂານ ວິນຍານແມ່ນບໍ?

ປຣ. ແມ່ນ

ສກ. ອັນຕະຣະພົບມີຮູບ ເວທະນາ ສັນຍາ ສັງຂານ ວິນຍານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກາມະພົບເປັນພົບທີ່ມີຂັນ ໕ ແມ່ນບໍ?

ປຣ. ແມ່ນ

ສກ. ອັນຕະຣະພົບເປັນພົບທີ່ມີຂັນ ໕ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບພົບມີຢູ່ ຮູບພົບເປັນພົບ ເປັນຄະຕິ ເປັນສັດຕາວາດ ເປັນສົງສານ ເປັນກຳເນີດ ເປັນວິນຍານຖິຕິ ເປັນການໄດ້ອັດຕະພາບແມ່ນບໍ?

ປຣ. ແມ່ນ

ສກ. ອັນຕະຣະພົບມີຢູ່ ອັນຕະຣະພົບເປັນພົບ ເປັນຄະຕິ ເປັນສັດຕາວາດ ເປັນສົງສານ ເປັນກຳເນີດ ເປັນວິນຍານຖິຕິ ເປັນການໄດ້ອັດຕະພາບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກຳທີ່ໃຫ້ເຂົ້າເຖິງຣູບພົບມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ກຳທີ່ໃຫ້ເຂົ້າເຖິງອັນຕະຣະພົບມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສັດຜູ້ເຂົ້າເຖິງຣູບພົບມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ສັດຜູ້ເຂົ້າເຖິງອັນຕະຣະພົບມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນຣູບພົບ ມີສັດເກີດ ແກ່ ຕາຍ ຈຸຕິ ປະຕິສົນທິແມ່ນບໍ?

ປຣ. ແມ່ນ

ສກ. ອັນຕະຣະພົບມີສັດເກີດ ແກ່ ຕາຍ ຈຸຕິ ປະຕິສົນທິແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນຣູບພົບ ມີຣູບ ເວທະນາ ສັນຍາ ສັງຂານ ວິນຍານແມ່ນບໍ?

ປຣ. ແມ່ນ

ສກ. ໃນອັນຕະຣະພົບ ມີຣູບ ເວທະນາ ສັນຍາ ສັງຂານ ວິນຍານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຣູບພົບເປັນພົບທີ່ມີຂັນ ໕ ແມ່ນບໍ?

ປຣ. ແມ່ນ

ສກ. ອັນຕະຣະພົບເປັນພົບທີ່ມີຂັນ ໕ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະຣູບພົບມີຢູ່ ອະຣູບພົບເປັນພົບ ເປັນຄະຕິ ເປັນສັດຕາວາດ ເປັນສົງສານ ເປັນກຳເນີດ ເປັນວິນຍານຖິຕິ ເປັນການໄດ້ອັດຕະພາບແມ່ນບໍ?

ປຣ. ແມ່ນ

ສກ. ອັນຕະຣະພົບມີຢູ່ ອັນຕະຣະພົບເປັນພົບ ເປັນຄະຕິ ເປັນສັດຕາວາດ ເປັນສົງສານ ເປັນກຳເນີດ ເປັນວິນຍານຖິຕິ ເປັນການໄດ້ອັດຕະພາບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກຳທີ່ໃຫ້ເຂົ້າເຖິງອະຣູບພົບມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ກຳທີ່ໃຫ້ເຂົ້າເຖິງອັນຕະຣະພົບມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ສັດຜູ້ເຂົ້າເຖິງອະຣູບພົບມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ສັດຜູ້ເຂົ້າເຖິງອັນຕະຣະພົບມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ໃນອະຣູບພົບ ມີສັດເກີດ ແກ່ ຕາຍ ຈຸຕິ ປະຕິສົນທິແມ່ນບໍ?

ປຣ. ແມ່ນ

ສກ. ໃນອັນຕະຣະພົບ ມີສັດເກີດ ແກ່ ຕາຍ ຈຸຕິ ປະຕິສົນທິແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ໃນອະຣູບພົບ ມີເວທະນາ ສັນຍາ ສັງຂານ ວິນຍານແມ່ນບໍ?

ປຣ. ແມ່ນ

ສກ. ໃນອັນຕະຣະພົບ ມີເວທະນາ ສັນຍາ ສັງຂານ ວິນຍານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ອະຣູບພົບເປັນພົບທີ່ມີຂັນ ໔ ແມ່ນບໍ?

ປຣ. ແມ່ນ

ສກ. ອັນຕະຣະພົບເປັນພົບທີ່ມີຂັນ ໔ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໔໐໗] ສກ. ອັນຕະຣະພົບມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ສັດທັງປວງນັ້ນເອງມີອັນຕະຣະພົບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ສັດທັງປວງນັ້ນເອງບໍ່ມີອັນຕະຣະພົບແມ່ນບໍ?

ປຣ. ແມ່ນ

ສກ. ຫາກສັດທັງປວງນັ້ນເອງບໍ່ມີອັນຕະຣະພົບ ທ່ານກໍບໍ່ຄວນຍອມຮັບວ່າ "ອັນຕະຣະພົບ ມີຢູ່"

ສກ. ອັນຕະຣະພົບມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ເຮັດອະນັນຕະຣິຍະກຳມີອັນຕະຣະພົບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ບຸກຄົນຜູ້ເຮັດອະນັນຕະຣິຍະກຳບໍ່ມີອັນຕະຣະພົບແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນຜູ້ເຮັດອະນັນຕະຣິຍະກຳບໍ່ມີອັນຕະຣະພົບ ທ່ານກໍບໍ່ຄວນຍອມຮັບວ່າ "ອັນຕະຣະພົບມີຢູ່"

ສກ. ບຸກຄົນຜູ້ບໍ່ເຮັດອະນັນຕະຣິຍະກຳມີອັນຕະຣະພົບແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ເຮັດອະນັນຕະຣິຍະກຳມີອັນຕະຣະພົບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ເຮັດອະນັນຕະຣິຍະກຳບໍ່ມີອັນຕະຣະພົບແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ບໍ່ເຮັດອະນັນຕະຣິຍະກຳບໍ່ມີອັນຕະຣະພົບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ເຂົ້າເຖິງນະຣົກ ຯລຯ ຜູ້ເຂົ້າເຖິງອະສັນຍະສັດ ຯລຯ ຜູ້ເຂົ້າເຖິງອະຣູບພົບ ມີອັນຕະຣະພົບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ເຂົ້າເຖິງອະຣູບພົບບໍ່ມີອັນຕະຣະພົບແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນຜູ້ເຂົ້າເຖິງອະຣູບພົບບໍ່ມີອັນຕະຣະພົບ ທ່ານກໍບໍ່ຄວນຍອມຮັບວ່າ ອັນຕະຣະພົບມີຢູ່"

ສກ. ບຸກຄົນຜູ້ບໍ່ເຂົ້າເຖິງອະຣູບພົບມີອັນຕະຣະພົບແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ເຂົ້າເຖິງອະຣູບພົບມີອັນຕະຣະພົບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ເຂົ້າເຖິງອະຣູບພົບບໍ່ມີອັນຕະຣະພົບແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ບໍ່ເຂົ້າເຖິງອະຣູບພົບບໍ່ມີອັນຕະຣະພົບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໐໙] ປຣ. ທ່ານບໍ່ຍອມຮັບວ່າ "ອັນຕະຣະພົບມີຢູ່" ແມ່ນບໍ?

ສກ. ແມ່ນ

ປຣ. ອັນຕະຣາປະຣິນິບພາຍີບຸກຄົນມີຢູ່ບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກອັນຕະຣາປະຣິນິບພາຍີບຸກຄົນມີຢູ່ ທ່ານຈຶ່ງຄວນຍອມຮັບວ່າ "ອັນຕະຣະພົບມີຢູ່"

ສກ. ຍ້ອນທ່ານເຂົ້າໃຈວ່າ "ອັນຕະຣາປະຣິນິບພາຍີບຸກຄົນມີຢູ່" ຈຶ່ງຍອມຮັບວ່າ "ອັນຕະຣະພີບມີຢູ່" ແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນທ່ານເຂົ້າໃຈວ່າ "ອຸປະຫັດຈະປະຣິນິບພາຍີບຸກຄົນມີຢູ່" ຈຶ່ງຍອມຮັບວ່າ "ອຸປະຫັດຈະພີບມີຢູ່" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຍ້ອນທ່ານເຂົ້າໃຈວ່າ "ອັນຕະຣາປະຣິນິບພາຍີບຸກຄົນມີຢູ່" ຈຶ່ງຍອມຮັບວ່າ "ອັນຕະຣະພີບມີຢູ່" ແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນທ່ານເຂົ້າໃຈວ່າ "ອະສັງຂາຣະປະຣິນິບພາຍີບຸກຄົນມີຢູ່ ຯລຯ ສະສັງຂາຣະປະຣິນິບພາຍີບຸກຄົນມີຢູ່" ຈຶ່ງຍອມຮັບວ່າ "ສະສັງຂາຣະພີບມີຢູ່" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

**ອັນຕະຣາພະວະກະຖາ ຈົບ**

## ໓. ກາມະຄຸນະກະຖາ (ກ໕)

## ວ່າດ້ວຍກາມມະຄຸນ

[໔໑໐] ສກ. ກາມມະຄຸນ ໕ ເທົ່ານັ້ນເປັນກາມທາດແມ່ນບໍ?

ປຣ. ແມ່ນ

ສກ. ຄວາມພໍໃຈທີ່ກ່ຽວກັບກາມມະຄຸນ ໕ ນັ້ນມີຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຄວາມພໍໃຈທີ່ກ່ຽວກັບກາມມະຄຸນ ໕ ນັ້ນມີຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ກາມມະຄຸນ ໕ ເທົ່ານັ້ນເປັນກາມທາດ"

ສກ. ຄວາມກຳໜັດ ຄວາມພໍໃຈ ຄວາມພໍໃຈ ແລະຄວາມກຳໜັດທີ່ກ່ຽວກັບກາມມະຄຸນ ໕ ນັ້ນ ຯລຯ ຄວາມດຳຣິ ຄວາມກຳໜັດ ຄວາມດຳຣິແລະຄວາມກຳໜັດທີ່ກ່ຽວກັບ ກາມມະຄຸນ ໕ ນັ້ນ ຯລຯ ປີຕິ ໂສມະນັດ ປີຕິແລະໂສມະນັດ ທີ່ກ່ຽວກັບກາມມະຄຸນ ໕ ນັ້ນມີຢູ່ ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກປີຕິ ແລະໂສມະນັດທີ່ກ່ຽວກັບກາມມະຄຸນ ໕ ນັ້ນມີຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ກາມມະຄຸນ ໕ ເທົ່ານັ້ນເປັນກາມທາດ"

ສກ. ກາມມະຄຸນ ໕ ເທົ່ານັ້ນເປັນກາມທາດແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂຸຂອງມະນຸດບໍ່ເປັນການທາດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂສຕະ ຯລຯ ຄານະ ຯລຯ ຊິວຫາ ຯລຯ ກາຍ ຯລຯ ມະໂນຂອງມະນຸດບໍ່ເປັນການທາດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ມະໂນຂອງມະນຸດບໍ່ເປັນການທາດແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ການມະຄຸນ ໕ ອັນມີໃຈເປັນທີ ໖ ເຊິ່ງມີຢູ່ໃນໂລກ
ເຮົາປະກາດໄວ້ຊັດເຈນແລ້ວ
ສັດໂລກຄາຍຄວາມພໍໃຈໃນການມະຄຸນ ໕ ນີ້ໄດ້
ຍ່ອມພົ້ນຈາກທຸກໄດ້ ດ້ວຍວິທີດັ່ງກ່າວນີ້"

ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ມະໂນຂອງມະນຸດບໍ່ເປັນການທາດ"

[໕໑໑] ສກ. ການມະຄຸນ ໕ ເທົ່ານັ້ນເປັນການທາດແມ່ນບໍ?

ປຣ. ແມ່ນ

ສກ. ການມະຄຸນເປັນພົບ ເປັນຄະຕິ ເປັນສັດຕາວາດ ເປັນສົງສານ ເປັນກຳເນີດ ເປັນວິນຍານຖິຕິ ເປັນການໄດ້ອັດຕະພາບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກຳທີ່ໃຫ້ເຂົ້າເຖິງການມະຄຸນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສັດຜູ້ເຂົ້າເຖິງການມະຄຸນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນການມະຄຸນ ມີສັດເກີດ ແກ່ ຕາຍ ຈຸຕິ ປະຕິສົນທິແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນການມະຄຸນ ມີຮູບ ເວທະນາ ສັນຍາ ສັງຂານ ວິນຍານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການມະຄຸນເປັນພົບທີ່ມີຂັນ ໕ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນການມະຄຸນ ມີພຣະສຳມາສຳພຸດທະເຈົ້າທັງຫຼາຍ ພຣະປັດເຈກພຸດທະເຈົ້າທັງຫຼາຍ ຄູ່ພຣະອັກຄະຣະສາວົກອຸບັດຂຶ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການທາດເປັນພົບ ເປັນຄະຕິ ເປັນສັດຕາວາດ ເປັນສົງສານ ເປັນກຳເນີດເປັນວິນຍານຖິຕິ ເປັນການໄດ້ອັດຕະພາບແມ່ນບໍ?

ປຣ. ແມ່ນ

ສກ. ການມະຄຸນເປັນພົບ ເປັນຄະຕິ ເປັນສັດຕາວາດ ເປັນສົງສານ ເປັນກຳເນີດເປັນວິນຍານຖິຕິ ເປັນການໄດ້ອັດຕະພາບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກຳທີ່ໃຫ້ເຂົ້າເຖິງການທາດມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ກຳທີ່ໃຫ້ເຂົ້າເຖິງການມະຄຸນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສັດຜູ້ເຂົ້າເຖິງການທາດມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ສັດຜູ້ເຂົ້າເຖິງການມະຄຸນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນການທາດ ມີສັດເກີດ ແກ່ ຕາຍ ຈຸຕິ ປະຕິສົນທິແມ່ນບໍ?

ປຣ. ແມ່ນ

ສກ. ໃນການມະຄຸນ ມີສັດເກີດ ແກ່ ຕາຍ ຈຸຕິ ປະຕິສົນທິແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນການທາດ ມີຮູບ ເວທະນາ ສັນຍາ ສັງຂານ ວິນຍານແມ່ນບໍ?

ປຣ. ແມ່ນ

ສກ. ໃນການມະຄຸນ ມີຮູບ ເວທະນາ ສັນຍາ ສັງຂານ ວິນຍານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການທາດເປັນພົບທີ່ມີຂັນ ໕ ແມ່ນບໍ?

ປຣ. ແມ່ນ

ສກ. ການມະຄຸນເປັນພົບທີ່ມີຂັນ ໕ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນການທາດ ມີພຣະສຳມາສຳພຸດທະເຈົ້າທັງຫຼາຍ ພຣະປັດເຈກພຸດທະເຈົ້າທັງຫຼາຍ ຄູ່ພຣະອັກຄະຣະສາວົກອຸບັດຂຶ້ນແມ່ນບໍ?

ປຣ. ແມ່ນ

ສກ. ໃນກາມມະຄຸນ ມີພຣະສຳມາສຳພຸດທະເຈົ້າທັງຫຼາຍ ພຣະປັດເຈກພຸດທະເຈົ້າທັງຫຼາຍ ຄູ່ພຣະອັກຄະຣະສາວົກອຸບັດຂຶ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໑໘] ປຣ. ທ່ານບໍ່ຍອມຮັບວ່າ "ກາມມະຄຸນ ໕ ເທົ່ານັ້ນເປັນກາມທາດ" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ກາມມະຄຸນ ໕ ປະການນີ້ ກາມມະຄຸນ ໕ ປະການ ອັນໃດແດ່ ຄື (໑) ຮູບທີ່ເພິ່ງຮູ້ແຈ້ງທາງຕາ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ (໒) ສຽງທີ່ເພິ່ງຮູ້ແຈ້ງທາງຫູ ຯລຯ (໓) ກິ່ນທີ່ເພິ່ງຮູ້ແຈ້ງທາງດັງ ຯລຯ (໔) ຣົດທີ່ເພິ່ງຮູ້ແຈ້ງທາງລີ້ນ ຯລຯ (໕) ໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ ພິກຂຸທັງຫຼາຍ ກາມມະຄຸນ ໕ ປະການນີ້"[໘] ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ກາມມະຄຸນ ໕ ເທົ່ານັ້ນຈຶ່ງເປັນກາມທາດ

**ກາມະຄຸນະກະຖາ ຈົບ**

## ໔. ກາມະກະຖາ (ກຖ)

## ວ່າດ້ວຍກາມ

[໔໑໙] ສກ. ອາຍະຕະນະ ໕ ເທົ່ານັ້ນເປັນກາມແມ່ນບໍ?

ປຣ. ແມ່ນ

ສກ. ຄວາມພໍໃຈທີ່ກ່ຽວກັບອາຍະຕະນະ ໕ ນັ້ນມີຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຄວາມພໍໃຈກ່ຽວກັບອາຍະຕະນະ ໕ ນັ້ນມີຢູ່ ທ່ານກໍບໍ່ຄວນຍອມຮັບ

ວ່າ "ອາຍະຕະນະ ໕ ເທົ່ານັ້ນເປັນກາມ"

ສກ. ຄວາມກຳໜັດ ຄວາມພໍໃຈ ຄວາມກຳໜັດແລະຄວາມພໍໃຈທີ່ກ່ຽວກັບອາຍະຕະນະ ໕ ນັ້ນ ຯລຯ ຄວາມດຳຣິ ຄວາມກຳໜັດ ຄວາມດຳຣິ ແລະຄວາມກຳໜັດທີ່ກ່ຽວກັບອາຍະຕະນະ ໕ ນັ້ນ ຯລຯ ປີຕິ ໂສມະນັດ ປີຕິແລະໂສມະນັດທີ່ກ່ຽວກັບອາຍະຕະນະ ໕ ນັ້ນ ມີຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກປີຕິ ແລະໂສມະນັດທີ່ກ່ຽວກັບອາຍະຕະນະ ໕ ນັ້ນມີຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ອາຍະຕະນະ ໕ ເທົ່ານັ້ນເປັນກາມ"

[໔໑໔] ປຣ. ທ່ານບໍ່ຍອມຮັບວ່າ "ອາຍະຕະນະ ໕ ເທົ່ານັ້ນເປັນກາມ" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ກາມມະຄຸນ ໕ ປະການນີ້ ໕ ປະການ ອັນໃດແດ່ ຄື (໑) ຮູບທີ່ເພິ່ງຮູ້ແຈ້ງທາງຕາ ຯລຯ (໕) ໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ ພິກຂຸທັງຫຼາຍ ກາມມະຄຸນ ໕ ປະການນີ້" ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ອາຍະຕະນະ ໕ ເທົ່ານັ້ນຈຶ່ງເປັນກາມ

ສກ. ອາຍະຕະນະ ໕ ເທົ່ານັ້ນເປັນກາມແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ກາມມະຄຸນ ໕ ປະການນີ້ ກາມມະຄຸນ ໕ ປະການອັນໃດແດ່ ຄື (໑) ຮູບທີ່ເພິ່ງຮູ້ແຈ້ງທາງຕາ ຯລຯ (໕) ໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ ພິກຂຸທັງຫຼາຍ ກາມມະຄຸນ ໕ ປະການນີ້ ພິກຂຸທັງຫຼາຍ ແຕ່ສິ່ງເຫລົ່ານີ້ບໍ່ຮຽກວ່າກາມ ສິ່ງເຫລົ່ານີ້ຮຽກວ່າກາມມະຄຸນໃນອະຣິຍະວິໄນ

(ພຣະຜູ້ມີພຣະພາກຜູ້ສຸຄົດສາດສະດາ ໄດ້ຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ)

ສັງກັບປະຣາຄະຂອງບຸຣຸດ ຊື່ວ່າກາມ
ອາລົມທີ່ວິຈິດທັງຫຼາຍໃນໂລກບໍ່ຊື່ວ່າກາມ
ສັງກັບປະຣາຄະຂອງບຸຣຸດ ຊື່ວ່າກາມ
ອາລົມທີ່ວິຈິດທັງຫຼາຍໃນໂລກ
ຕັ້ງຢູ່ຕາມສະພາບຂອງຕົນຢູ່ຢ່າງນັ້ນເອງ
ທີຣະຊົນທັງຫຼາຍ ເພິ່ງກຳຈັດແຕ່ຄວາມພໍໃຈ
ໃນອາລົມທີ່ວິຈິດເຫຼົ່ານັ້ນ"

ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ອາຍະຕະນະ ໕ ເທົ່ານັ້ນເປັນກາມ"

**ກາມະກະຖາ ຈົບ**

# ໔. ຣູປະທາຕຸກະຖາ (ກາ)

## ວ່າດ້ວຍຣູບທາດ

[໔໑໔] ສກ. ສະພາວະທຳທີ່ເປັນຣູບເປັນຣູບທາດແມ່ນບໍ?

ປຣ. ແມ່ນ

ສກ. ຣູບເປັນພົບ ເປັນຄະຕິ ເປັນສັດຕາວາດ ເປັນສົງສານ ເປັນກຳເນີດ ເປັນວິນຍານຖິຕິ ເປັນການໄດ້ອັດຕະພາບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກຳທີ່ໃຫ້ເຂົ້າເຖິງຣູບມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສັດຜູ້ເຂົ້າເຖິງຣູບມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນຣູບ ມີສັດເກີດ ແກ່ ຕາຍ ຈຸຕິ ປະຕິສົນທິແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນຣູບ ມີຣູບ ເວທະນາ ສັນຍາ ສັງຂານ ວິນຍານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຣູບເປັນພົບທີ່ມີຂັນ ໕ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຣູບທາດເປັນພົບ ເປັນຄະຕິ ຯລຯ ເປັນການໄດ້ອັດຕະພາບແມ່ນບໍ?

ປຣ. ແມ່ນ

ສກ. ຣູບເປັນພົບ ເປັນຄະຕິ ຯລຯ ເປັນການໄດ້ອັດຕະພາບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກຳທີ່ໃຫ້ເຂົ້າເຖິງຣູບທາດມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ກຳທີ່ໃຫ້ເຂົ້າເຖິງຣູບມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສັດຜູ້ເຂົ້າເຖິງຣູບທາດມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ສັດຜູ້ເຂົ້າເຖິງຣູບມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນຣູບທາດ ມີສັດເກີດ ແກ່ ຕາຍ ຈຸຕິ ປະຕິສົນທິແມ່ນບໍ?

ປຣ. ແມ່ນ

ສກ. ໃນຮູບ ມີສັດເກີດ ແກ່ ຕາຍ ຈຸຕິ ປະຕິສົນທິແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນຮູບທາດ ມີຮູບ ເວທະນາ ສັນຍາ ສັງຂານ ວິນຍານແມ່ນບໍ?

ປຣ. ແມ່ນ

ສກ. ໃນຮູບ ມີຮູບ ເວທະນາ ສັນຍາ ສັງຂານ ວິນຍານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບທາດເປັນພົບທີ່ມີຂັນ ໕ ແມ່ນບໍ?

ປຣ. ແມ່ນ

ສກ. ຮູບເປັນພົບທີ່ມີຂັນ ໕ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໕໑໖] ສກ. ສະພາວະທຳທີ່ເປັນຮູບ ເປັນຮູບທາດ ໃນກາມທາດ ມີຮູບແມ່ນບໍ?

ປຣ. ແມ່ນ

ສກ. ກາມທາດກັບຮູບທາດເປັນອັນດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກາມທາດກັບຮູບທາດເປັນອັນດຽວກັນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະກອບດ້ວຍກາມະພົບ ຊື່ວ່າເປັນຜູ້ປະກອບດ້ວຍພົບ ໒ ຄືກາມະພົບ ແລະຮູບພົບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

**ຮູປະທາຕຸກະຖາ ຈົບ**

## ໖. ອະຮູປະທາຕຸກະຖາ (໗໙)

## ວ່າດ້ວຍອະຮູບທາດ

[໕໑໗] ສກ. ສະພາວະທຳທີ່ບໍ່ເປັນຮູບເປັນອະຮູບທາດແມ່ນບໍ?

ປຣ. ແມ່ນ

ສກ. ເວທະນາເປັນພົບ ເປັນຄະຕິ ເປັນສັດຕາວາດ ເປັນສົງສານ ເປັນກຳເນີດ ເປັນວິນຍານຖິຕິ ເປັນການໄດ້ອັດຕະພາບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກຳທີ່ໃຫ້ເຂົ້າເຖິງເວທະນາມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ສັດຜູ້ເຂົ້າເຖິງເວທະນາມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ໃນເວທະນາ ມີສັດເກີດ ແກ່ ຕາຍ ຈຸຕິ ປະຕິສົນທິແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ໃນເວທະນາ ມີເວທະນາ ສັນຍາ ສັງຂານ ວິນຍານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ເວທະນາເປັນພົບທີ່ມີຂັນ ໔ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ອະຮູບທາດເປັນພົບ ເປັນຄະຕິ ฯลฯ ເປັນການໄດ້ອັດຕະພາບ ແມ່ນບໍ?

ປຣ. ແມ່ນ

ສກ. ເວທະນາເປັນພົບ ເປັນຄະຕິ ฯลฯ ເປັນການໄດ້ອັດຕະພາບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ກຳທີ່ໃຫ້ເຂົ້າເຖິງອະຮູບທາດມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ກຳທີ່ໃຫ້ເຂົ້າເຖິງເວທະນາມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ສັດຜູ້ເຂົ້າເຖິງອະຮູບທາດມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ສັດຜູ້ເຂົ້າເຖິງເວທະນາມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ໃນອະຮູບທາດ ມີສັດເກີດ ແກ່ ຕາຍ ຈຸຕິ ປະຕິສົນທິແມ່ນບໍ?

ປຣ. ແມ່ນ

ສກ. ໃນເວທະນາ ມີສັດເກີດ ແກ່ ຕາຍ ຈຸຕິ ປະຕິສົນທິແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ໃນອະຮູບທາດ ມີເວທະນາ ສັນຍາ ສັງຂານ ວິນຍານແມ່ນບໍ?

ປຣ. ແມ່ນ

ສກ. ໃນເວທະນາ ມີເວທະນາ ສັນຍາ ສັງຂານ ວິນຍານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ອະຮູບທາດເປັນພົບທີ່ມີຂັນ ໔ ແມ່ນບໍ?

ປຣ. ແມ່ນ

ສກ. ເວທະນາເປັນພົບທີ່ມີຂັນ ໔ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

[໔໑໗] ສກ. ສະພາວະທຳທີ່ບໍ່ເປັນຮູບເປັນອະຮູບທາດ ໃນການທາດມີເວທະນາ ສັນຍາ ສັງຂານ ວິນຍານແມ່ນບໍ?

ປຣ. ແມ່ນ

ສກ. ການທາດກັບອະຮູບທາດເປັນອັນດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ການທາດກັບອະຮູບທາດເປັນອັນດຽວກັນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະກອບດ້ວຍການະພົບ ຊື່ວ່າເປັນຜູ້ປະກອບດ້ວຍພົບ ໔ ຄື ການະພົບ ແລະອະຮູບພົບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ສະພາວະທຳທີ່ເປັນຮູບເປັນຮູບທາດ ສະພາວະທຳທີ່ບໍ່ເປັນຮູບເປັນອະຮູບທາດ ໃນການທາດ ມີຮູບ ເວທະນາ ສັນຍາ ສັງຂານ ວິນຍານແມ່ນບໍ?

ປຣ. ແມ່ນ

ສກ. ການທາດ ຮູບທາດ ແລະອະຮູບທາດເປັນອັນດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ການທາດ ຮູບທາດ ແລະອະຮູບທາດເປັນອັນດຽວກັນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ປະກອບດ້ວຍການະພົບ ຊື່ວ່າເປັນຜູ້ປະກອບດ້ວຍພົບ ໓ ຄື ການະພົບ ຮູບພົບ ແລະອະຮູບພົບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

**ອະຮູບທາດກະຖາ ຈົບ**

## ໗. ຮູປະທາຕຸຍາອາຍະຕະນະກະຖາ (໗໙)

## ວ່າດ້ວຍອາຍະຕະນະໃນຮູບທາດ

[໔໑໙] ສກ. ອັດຕະພາບປະກອບດ້ວຍອາຍະຕະນະ ໖ ມີຢູ່ໃນຮູບທາດແມ່ນບໍ?

ປຣ. ແມ່ນ

ສກ. ໃນຮູບທາດນັ້ນ ມີຄານາຍະຕະນະແມ່ນບໍ?

ປຣ. ແມ່ນ

ສກ. ໃນຮູບທາດນັ້ນ ມີຄັນທາຍະຕະນະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນຮູບທາດນັ້ນ ມີຊິວຫາຍະຕະນະແມ່ນບໍ?

ປຣ. ແມ່ນ

ສກ. ໃນຮູບທາດນັ້ນ ມີຣະສາຍະຕະນະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນຮູບທາດນັ້ນ ມີກາຍາຍະຕະນະແມ່ນບໍ?

ປຣ. ແມ່ນ

ສກ. ໃນຮູບທາດນັ້ນ ມີໂຜດຖັບພາຍະຕະນະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນຮູບທາດນັ້ນ ບໍ່ມີຄັນທາຍະຕະນະແມ່ນບໍ?

ປຣ. ແມ່ນ

ສກ. ໃນຮູບທາດນັ້ນ ບໍ່ມີຄານາຍະຕະນະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນຮູບທາດນັ້ນ ບໍ່ມີຣະສາຍະຕະນະແມ່ນບໍ?

ປຣ. ແມ່ນ

ສກ. ໃນຮູບທາດນັ້ນ ບໍ່ມີຊິວຫາຍະຕະນະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນຮູບທາດນັ້ນ ບໍ່ມີໂຜດຖັບພາຍະຕະນະແມ່ນບໍ?

ປຣ. ແມ່ນ

ສກ. ໃນຮູບທາດນັ້ນ ບໍ່ມີກາຍາຍະຕະນະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໕໔໐] ສກ. ໃນຮູບທາດນັ້ນ ມີຈັກຂາຍະຕະນະ ແລະຣູປາຍະຕະນະແມ່ນບໍ?

ປຣ. ແມ່ນ

ສກ. ໃນຮູບທາດນັ້ນ ມີຄານາຍະຕະນະແລະຄັນທາຍະຕະນະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນຮູບທາດນັ້ນ ມີຈັກຂາຍະຕະນະແລະຣູປາຍະຕະນະແມ່ນບໍ?

ປຣ. ແມ່ນ

ສກ. ໃນຮູບທາດນັ້ນ ມີຊິວຫາຍະຕະນະແລະຣະສາຍະຕະນະ ຯລຯ ມີກາຍາຍະຕະນະແລະໂຜດຖັບພາຍະຕະນະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນຮູບທາດນັ້ນ ມີໂສຕາຍະຕະນະ ແລະສັດທາຍະຕະນະຯລຯ ມີມະນາຍະຕະນະແລະທຳມາຍະຕະນະແມ່ນບໍ?

ປຣ. ແມ່ນ

ສກ. ໃນຮູບທາດນັ້ນ ມີຄານາຍະຕະນະ ແລະຄັນທາຍະຕະນະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນຮູບທາດນັ້ນ ມີມະນາຍະຕະນະ ແລະທຳມາຍະຕະນະແມ່ນບໍ?

ປຣ. ແມ່ນ

ສກ. ໃນຮູບທາດນັ້ນ ມີຊິວຫາຍະຕະນະ ແລະຣະສາຍະຕະນະ ຯລຯ ມີກາຍາຍະຕະນະ ແລະໂຜດຖັບພາຍະຕະນະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນຮູບທາດນັ້ນ ມີຄານາຍະຕະນະ ແຕ່ບໍ່ມີຄັນທາຍະຕະນະແມ່ນບໍ?

ປຣ. ແມ່ນ

ສກ. ໃນຮູບທາດນັ້ນ ມີຈັກຂາຍະຕະນະ ແຕ່ບໍ່ມີຮູປາຍະຕະນະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນຮູບທາດນັ້ນ ມີຄານາຍະຕະນະ ແຕ່ບໍ່ມີຄັນທາຍະຕະນະແມ່ນບໍ?

ປຣ. ແມ່ນ

ສກ. ໃນຮູບທາດນັ້ນ ມີໂສຕາຍະຕະນະ ແຕ່ບໍ່ມີສັດທາຍະຕະນະ ຯລຯ ມີມະນາຍະຕະນະ ແຕ່ບໍ່ມີທຳມາຍະຕະນະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນຮູບທາດນັ້ນ ມີຊິວຫາຍະຕະນະ ແຕ່ບໍ່ມີຣະສາຍະຕະນະ ຯລຯ ມີກາຍາຍະຕະນະ ແຕ່ບໍ່ມີໂຜດຖັບພາຍະຕະນະແມ່ນບໍ?

ປຣ. ແມ່ນ

ສກ. ໃນຮູບທາດນັ້ນ ມີຈັກຂາຍະຕະນະ ແຕ່ບໍ່ມີຮູປາຍະຕະນະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນຮູບທາດນັ້ນ ມີກາຍາຍະຕະນະ ແຕ່ບໍ່ມີໂຜດຖັບພາຍະຕະນະແມ່ນບໍ?

ປຣ. ແມ່ນ

ສກ. ໃນຮູບທາດນັ້ນ ມີໂສຕາຍະຕະນະ ແຕ່ບໍ່ມີສັດທາຍະຕະນະ ຯລຯ ມີມະນາຍະຕະນະ ແຕ່ບໍ່ມີທຳມາຍະຕະນະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໔໑] ສກ. ໃນຣູບທາດນັ້ນ ມີຈັກຂາຍະຕະນະ ແລະຣູປາຍະຕະນະ ບຸກຄົນເຫັນຣູບນັ້ນທາງຕາແມ່ນບໍ?

ປຣ. ແມ່ນ

ສກ. ໃນຣູບທາດນັ້ນ ມີຄານາຍະຕະນະ ແລະຄັນທາຍະຕະນະ ບຸກຄົນດົມກິ່ນນັ້ນທາງດັງນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນຣູບທາດນັ້ນ ມີຈັກຂາຍະຕະນະ ແລະຣູປາຍະຕະນະ ບຸກຄົນເຫັນຣູບນັ້ນທາງຕາແມ່ນບໍ?

ປຣ. ແມ່ນ

ສກ. ໃນຣູບທາດນັ້ນ ມີຊິວຫາຍະຕະນະ ແລະຣະສາຍະຕະນະ ບຸກຄົນຊີມຣົດນັ້ນທາງລີ້ນ ຯລຯ ມີກາຍາຍະຕະນະ ແລະໂຜດຖັບພາຍະຕະນະ ບຸກຄົນຖືກຕ້ອງໂຜດຖັບພະນັ້ນທາງກາຍແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນຣູບທາດນັ້ນ ມີໂສຕາຍະຕະນະ ແລະສັດທາຍະຕະນະ ຯລຯ ມີມະນາຍະຕະນະ ແລະທຳມາຍະຕະນະ ບຸກຄົນຮູ້ທຳມາຣົມນັ້ນທາງໃຈແມ່ນບໍ?

ປຣ. ແມ່ນ

ສກ. ໃນຣູບທາດນັ້ນ ມີຄານາຍະຕະນະ ແລະຄັນທາຍະຕະນະ ບຸກຄົນດົມກິ່ນນັ້ນທາງດັງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນຣູບທາດນັ້ນ ມີມະນາຍະຕະນະ ແລະທຳມາຍະຕະນະ ບຸກຄົນຮູ້ທຳມາຣົມນັ້ນທາງໃຈ ແມ່ນບໍ?

ປຣ. ແມ່ນ

ສກ. ໃນຣູບທາດນັ້ນ ມີຊິວຫາຍະຕະນະ ແລະຣະສາຍະຕະນະ ຯລຯ ມີກາຍາຍະຕະນະ ແລະໂຜດຖັບພາຍະຕະນະ ບຸກຄົນຖືກຕ້ອງໂຜດຖັບພະນັ້ນທາງກາຍແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນຣູບທາດນັ້ນ ມີຄານາຍະຕະນະ ແລະຄັນທາຍະຕະນະ ແຕ່ບຸກຄົນບໍ່ໄດ້ດົມກິ່ນນັ້ນທາງດັງແມ່ນບໍ?

ປຣ. ແມ່ນ

ສກ. ໃນຣູບທາດນັ້ນ ມີຈັກຂາຍະຕະນະ ແລະຣູປາຍະຕະນະ ແຕ່ບຸກຄົນບໍ່ເຫັນຣູບນັ້ນທາງຕາ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ໃນຮູບທາດນັ້ນ ມີຄານາຍະຕະນະ ແລະຄັນທາຍະຕະນະ ແຕ່ບຸກຄົນບໍ່ໄດ້ດົມກິ່ນນັ້ນທາງດັງແມ່ນບໍ?

ປຣ. ແມ່ນ

ສກ. ໃນຮູບທາດນັ້ນ ມີໂສຕາຍະຕະນະ ແລະສັດທາຍະຕະນະ ฯລฯ ມີມະນາຍະຕະນະ ແລະທຳມາຍະຕະນະ ແຕ່ບຸກຄົນບໍ່ຮູ້ທຳມາຣົມນັ້ນທາງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ໃນຮູບທາດນັ້ນ ມີຊິວຫາຍະຕະນະ ແລະຣະສາຍະຕະນະ ฯລฯ ມີກາຍາຍະຕະນະ ແລະໂຜດຖັບພາຍະຕະນະ ແຕ່ບຸກຄົນບໍ່ຖືກຕ້ອງໂຜດຖັບພະນັ້ນທາງກາຍ ແມ່ນບໍ?

ປຣ. ແມ່ນ

ສກ. ໃນຮູບທາດນັ້ນ ມີຈັກຂາຍະຕະນະ ແລະຣູປາຍະຕະນະ ແຕ່ບຸກຄົນບໍ່ເຫັນຮູບນັ້ນທາງຕາ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ໃນຮູບທາດນັ້ນ ມີກາຍາຍະຕະນະ ແລະໂຜດຖັບພາຍະຕະນະ ແຕ່ບຸກຄົນບໍ່ຖືກຕ້ອງໂຜດຖັບພະນັ້ນທາງກາຍແມ່ນບໍ?

ປຣ. ແມ່ນ

ສກ. ໃນຮູບທາດນັ້ນ ມີໂສຕາຍະຕະນະແລະສັດທາຍະຕະນະ ฯລฯ ມີມະນາຍະຕະນະ ແລະທຳມາຍະຕະນະ ແຕ່ບຸກຄົນບໍ່ຮູ້ທຳມາຣົມນັ້ນທາງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໔໔໔] ສກ. ໃນຮູບທາດນັ້ນ ມີຄານາຍະຕະນະ ແລະຄັນທາຍະຕະນະ ບຸກຄົນດົມກິ່ນນັ້ນທາງດັງແມ່ນບໍ?

ປຣ. ແມ່ນ

ສກ. ໃນຮູບທາດນັ້ນ ມີກິ່ນທີ່ເກີດຈາກຮາກ ເກີດຈາກແກ່ນ ເກີດຈາກເປືອກ ເກີດຈາກໃບ ເກີດຈາກດອກ ເກີດຈາກຜົນ ມີກິ່ນຄາວ ກິ່ນຂີວ ກິ່ນຫອມ ກິ່ນເໝັນ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ໃນຮູບທາດນັ້ນ ມີຊິວຫາຍະຕະນະ ແລະຣະສາຍະຕະນະ ບຸກຄົນຊີມຣົດນັ້ນທາງລີ້ນແມ່ນບໍ?

ປຣ. ແມ່ນ

ສກ. ໃນຮູບທາດນັ້ນ ມີຣົດທີ່ເກີດຈາກຮາກ ເກີດຈາກລຳຕົ້ນ ເກີດຈາກເປືອກ ເກີດຈາກໃບ ເກີດຈາກດອກ ເກີດຈາກຜົນ ມີຣົດສົ້ມ ຫວານ ຂົມ ຣົດເຜັດ ຣົດເຄັມ ຣົດຊ່າ ຫວານອົມສົ້ມ ຣົດຝາດ ຣົດກົມກ່ອມ ຣົດບໍ່ກົມກ່ອມແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນຮູບທາດນັ້ນ ມີກາຍາຍະຕະນະ ແລະໂຜດຖັບພາຍະຕະນະ ບຸກຄົນຖືກຕ້ອງໂຜດຖັບພະ ນັ້ນໄດ້ດ້ວຍກາຍນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ໃນຮູບທາດນັ້ນ ມີສຳຜັດທີ່ແຂງ ອ່ອນ ລະອຽດ ຫຍາບ ສະບາຍ ບໍ່ສະບາຍ ໜັກເບົາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໘໓] ປຣ. ທ່ານບໍ່ຍອມຮັບວ່າ "ອັດຕະພາບທີ່ປະກອບດ້ວຍອາຍະຕະນະ ໖ ມີຢູ່ໃນຮູບທາດນັ້ນ" ແມ່ນບໍ?

ສກ. ແມ່ນ

ປຣ. ໃນຮູບທາດນັ້ນ ມີຄານະນິມິດ ຊິວຫານິມິດ ແລະກາຍນິມິດບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກໃນຮູບທາດນັ້ນ ມີຄານະນິມິດ ຊິວຫານິມິດ ແລະກາຍນິມິດ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ອັດຕະພາບທີ່ປະກອບດ້ວຍອາຍະຕະນະ ໖ ມີຢູ່ໃນຮູບທາດ"

**ຮູປະທາຕຸຍາອາຍະຕະນະກະຖາ ຈົບ**

## ໗. ອະຣູເປຣູປະກະຖາ (໗໐)

## ວ່າດ້ວຍຮູບໃນອະຮູບ

[໔໘໔] ສກ. ໃນອະຮູບພົບ ຮູບມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ອະຮູປະພົບນັ້ນເປັນຮູບພົບທີ່ມີຮູບ ເປັນຄະຕິທີ່ມີຮູບ ເປັນສັດຕາວາດທີ່ມີຮູບ ເປັນສົງສານທີ່ມີຮູບ ເປັນກຳເນີດທີ່ມີຮູບ ເປັນການໄດ້ອັດຕະພາບທີ່ມີຮູບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະຮູບພົບນັ້ນເປັນພົບທີ່ບໍ່ມີຮູບ ເປັນຄະຕິທີ່ບໍ່ມີຮູບ ເປັນສັດຕາວາດທີ່ບໍ່ມີຮູບ ເປັນສົງສານທີ່ບໍ່ມີຮູບ ເປັນກຳເນີດທີ່ບໍ່ມີຮູບ ເປັນການໄດ້ອັດຕະພາບທີ່ບໍ່ມີຮູບບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກອະຮູບພົບນັ້ນເປັນພົບທີ່ບໍ່ມີຮູບ ຯລຯ ເປັນການໄດ້ອັດຕະພາບທີ່ບໍ່ມີຮູບ ທ່ານກໍບໍ່ຄວນຍອມຮັບວ່າ "ໃນອະຮູບພົບຮູບມີຢູ່"

ສກ. ໃນອະຮູບພົບ ຮູບມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ອະຣູບພົບນັ້ນເປັນພົບທີ່ມີຂັນ ໕ ເປັນຄະຕິ ຯລຯ ເປັນສັດຕາວາດ ຯລຯ ເປັນສົງສານເປັນກຳເນີດ ຯລຯ ເປັນວິນຍານຖິຕິ ຯລຯ ເປັນການໄດ້ອັດຕະພາບທີ່ມີຂັນ ໕ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະຣູບພົບນັ້ນເປັນພົບທີ່ມີຂັນ໔ ຯລຯ ເປັນການໄດ້ອັດຕະພາບທີ່ມີຂັນ ໔ ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກອະຣູບພົບນັ້ນເປັນພົບທີ່ມີຂັນ ໔ ເປັນຄະຕິ ຯລຯ ເປັນການໄດ້ອັດຕະພາບທີ່ມີຂັນ ໔ ທ່ານກໍບໍ່ຄວນຍອມຮັບວ່າ "ໃນອະຣູບພົບ ຣູບມີຢູ່"

[໔໔໕] ສກ. ໃນຣູບທາດ ຣູບມີຢູ່ ແລະຣູບທາດນັ້ນເປັນພົບທີ່ມີຣູບ ເປັນຄະຕິທີ່ມີຣູບ ເປັນສັດຕາວາດທີ່ມີຣູບ ເປັນສົງສານທີ່ມີຣູບ ເປັນກຳເນີດທີ່ມີຣູບ ເປັນການໄດ້ອັດຕະພາບ ທີ່ມີຣູບແມ່ນບໍ?

ປຣ. ແມ່ນ

ສກ. ໃນອະຣູບພົບ ຣູບມີຢູ່ ແລະອະຣູບພົບນັ້ນເປັນພົບທີ່ມີຣູບ ເປັນຄະຕິ ຯລຯ ເປັນການໄດ້ອັດຕະພາບທີ່ມີຣູບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນຣູບທາດ ຣູບມີຢູ່ ແລະຣູບທາດນັ້ນເປັນພົບທີ່ມີຂັນ ໕ ເປັນຄະຕິ ຯລຯ ເປັນການໄດ້ອັດຕະພາບທີ່ມີຂັນ ໕ ແມ່ນບໍ?

ປຣ. ແມ່ນ

ສກ. ໃນອະຣູບພົບຣູບມີຢູ່ ແລະອະຣູບພົບນັ້ນເປັນພົບທີ່ມີຂັນ ໕ ເປັນຄະຕິ ຯລຯ ເປັນການໄດ້ອັດຕະພາບທີ່ມີຂັນ ໕ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນອະຣູບພົບ ຣູບມີຢູ່ ແລະພົບນັ້ນເປັນພົບທີ່ບໍ່ມີອະຣູບ ເປັນຄະຕິທີ່ບໍ່ມີຣູບ ເປັນສັດຕະວາດທີ່ບໍ່ມີຣູບ ເປັນສົງສານທີ່ບໍ່ມີຣູບ ເປັນກຳເນີດທີ່ບໍ່ມີຣູບ ເປັນການໄດ້ອັດຕະພາບທີ່ບໍ່ມີຣູບແມ່ນບໍ?

ປຣ. ແມ່ນ

ສກ. ໃນອະຣູບທາດ ຣູບມີຢູ່ ແລະອະຣູບທາດນັ້ນເປັນພົບທີ່ບໍ່ມີຣູບ ເປັນຄະຕິທີ່ບໍ່ມີຣູບ ຯລຯ ເປັນການໄດ້ອັດຕະພາບທີ່ບໍ່ມີຣູບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນອະຣູບພົບ ຣູບມີຢູ່ ແລະອະຣູບພົບນັ້ນເປັນພົບທີ່ມີຂັນ ໔ ເປັນຄະຕິ ຯລຯ ເປັນການໄດ້ອັດຕະພາບທີ່ມີຂັນ ໔ ແມ່ນບໍ?

ປຣ. ແມ່ນ

ສກ. ໃນອະຣູບທາດ ຣູບມີຢູ່ ແລະອະຣູບທາດນັ້ນເປັນພົບທີ່ມີຂັນ ໔ ເປັນຄະຕິ ຯລຯ ເປັນການໄດ້ອັດຕະພາບທີ່ມີຂັນ ໔ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໔໖] ສກ. ໃນອະຣູບພົບ ຣູບມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ການສະລັດອອກຈາກຣູບ ພຣະຜູ້ມີພຣະພາກເຈົ້າຕັດວ່າ “ເປັນອະຣູບບໍ່ແມ່ນບໍ?”

ປຣ. ແມ່ນ

ສກ. ຫາກການສະລັດອອກຈາກຣູບ ພຣະຜູ້ມີພຣະພາກເຈົ້າຕັດວ່າ “ເປັນອະຣູບ” ທ່ານກໍບໍ່ຄວນຍອມຮັບວ່າ “ໃນອະຣູບພົບ ຣູບຍັງມີຢູ່”

ສກ. ການສະລັດອອກຈາກຣູບ ພຣະຜູ້ມີພຣະພາກເຈົ້າຕັດວ່າ “ເປັນອະຣູບ” ໂດຍມີພຣະປະສົງວ່າ “ໃນອະຣູບພົບ ຣູບຍັງມີຢູ່” ແມ່ນບໍ?

ປຣ. ແມ່ນ

ສກ. ການສະລັດອອກຈາກກາມ ພຣະຜູ້ມີພຣະພາກເຈົ້າຕັດວ່າ “ເປັນເນກຂຳມະ” ໂດຍມີພຣະປະສົງວ່າ “ກາມຍັງມີຢູ່ໃນເນກຂຳມະ ອາສະວະຍັງມີຢູ່ໃນອະນາສາວະ ໂລກິຍະທຳ ຍັງມີຢູ່ໃນໂລກຸດຕະຣະທຳ” ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

**ອະຣູເປຣູປະກະຖາ ຈົບ**

## ໗. ຣູປັງກຳມັນຕິກະຖາ (໗໑)

## ວ່າດ້ວຍກາກາໄຍຣູບເປັນກຳ

[໔໔໗] ສກ. ຣູບທີ່ເປັນກາຍຍະກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ເປັນກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ຣູບທີ່ເປັນກາຍຍະກຳ ເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ມີຄວາມຜູກໃຈ ມີຄວາມສົນໃຈ ມີຄວາມໃຝ່ໃຈ ມີຄວາມຈົງໃຈ ມີຄວາມປາຖະໜາ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຣູບທີ່ເປັນກາຍຍະກຳເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ບໍ່ມີຄວາມຜູກໃຈ ບໍ່ມີຄວາມສົນໃຈ ບໍ່ມີຄວາມໃຝ່ໃຈ ບໍ່ມີຄວາມຈົງໃຈ ບໍ່ມີຄວາມປາຖະໜາ ບໍ່ມີຄວາມຕັ້ງໃຈບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຮູບທີ່ເປັນກາຍຍະກຳເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈ ທ່ານກໍບໍ່ຄວນຍອມຮັບວ່າ "ຮູບທີ່ເປັນກາຍຍະກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ເປັນກຸສົນ"

ສກ. ຜັດສະທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ເປັນກຸສົນ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນກາຍຍະກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ເປັນກຸສົນ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເວທະນາ ຯລຯ ສັນຍາ ຯລຯ ເຈຕະນາ ຯລຯ ສັດທາ ຯລຯ ວິຣິຍະ ຯລຯ ສະຕິ ຯລຯ ສະມາທິ ຯລຯ ປັນຍາ ທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ເປັນກຸສົນ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນກາຍຍະກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ເປັນກຸສົນ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບທີ່ເປັນກາຍຍະກຳເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ເປັນກຸສົນ ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ຜັດສະທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ເປັນກຸສົນ ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບທີ່ເປັນກາຍຍະກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ເປັນກຸສົນ ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ເວທະນາ ຯລຯ ສັນຍາ ຯລຯ ເຈຕະນາ ຯລຯ ສັດທາ ຯລຯ ວິຣິຍະ ຯລຯ ສະຕິ ຯລຯ ສະມາທິ ຯລຯ ປັນຍາທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ເປັນກຸສົນ ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໔໗] ສກ. ຮູບທີ່ເປັນກາຍຍະກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ເປັນກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນທັງໝົດນັ້ນ ເປັນກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບທີ່ເປັນກາຍຍະກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ເປັນກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ຮູປາຍະຕະນະທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ເປັນກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບທີ່ເປັນກາຍຍະກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ເປັນກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ສັດທາຍະຕະນະ ຯລຯ ຄັນທາຍະຕະນະ ຯລຯ ຣະສາຍະຕະນະ ຯລຯ ໂຜດຖັບພາຍະຕະນະ ຯລຯ ປະຖະວີທາດ ຯລຯ ອາໂປທາດ ຯລຯ ເຕໂຊທາດ ຯລຯ ວາໂຍທາດ ທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ເປັນກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູປາຍະຕະນະທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ເປັນອັບພະຍາກະຕະແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນກາຍຍະກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ເປັນອັບພະຍາກະຕະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສັດທາຍະຕະນະ ຯລຯ ຄັນທາຍະຕະນະ ຯລຯ ຣະສາຍະຕະນະ ຯລຯ ໂຜດຖັບພາຍະຕະນະ ຯລຯ ປະຖະວີທາດ ຯລຯ ອາໂປທາດ ຯລຯ ເຕໂຊທາດ ຯລຯ ວາໂຍທາດ ທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ເປັນອັບພະຍາກະຕະແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນກາຍຍະກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ເປັນອັບພະຍາກະຕະ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໕໔໙] ສກ. ຮູບທີ່ເປັນກາຍຍະກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ຮັບຮູ້ອາລົມບໍ່ໄດ້ ເປັນກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ຮູປາຍະຕະນະທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ຮັບຮູ້ອາລົມບໍ່ໄດ້ ເປັນກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບທີ່ເປັນກາຍຍະກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ຮັບຮູ້ອາລົມບໍ່ໄດ້ ເປັນກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ສັດທາຍະຕະນະ ຯລຯ ຄັນທາຍະຕະນະ ຯລຯ ຣະສາຍະຕະນະຯລຯ ໂຜດຖັບພາຍະຕະນະ ຯລຯ ປະຖະວີທາດ ຯລຯ ອາໂປທາດ ຯລຯ ເຕໂຊທາດ ຯລຯ ວາໂຍທາດ ທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ຮັບຮູ້ອາລົມບໍ່ໄດ້ ເປັນກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຣູປາຍະຕະນະທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ຮັບຮູ້ອາລົມບໍ່ໄດ້ ເປັນອັບພະຍາກະຕະ ແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນກາຍຍະກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ຮັບຮູ້ອາລົມບໍ່ໄດ້ ເປັນອັບພະຍາກະຕະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສັດທາຍະຕະນະ ຯລຯ ຄັນທາຍະຕະນະ ຯລຯ ຣະສາຍະຕະນະຯລຯ ໂຜດຖັບພາຍະຕະນະ ຯລຯ ປະຖະວີທາດ ຯລຯ ອາໂປທາດ ຯລຯ ເຕໂຊທາດ ຯລຯ ວາໂຍທາດ ທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ຮັບຮູ້ອາລົມບໍ່ໄດ້ ເປັນອັບພະຍາກະຕະແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນກາຍຍະກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ຮັບຮູ້ອາລົມບໍ່ໄດ້ ເປັນອັບພະຍາກະຕະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໕໓໐] ສກ. ຮູບທີ່ເປັນກາຍຍະກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ເປັນກຸສົນທີ່ວິບປະຍຸດຈາກຜັດສະແມ່ນບໍ?

ປຣ. ແມ່ນ

ສກ. ຣູປາຍະຕະນະທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ເປັນກຸສົນທີ່ວິບປະຍຸດຈາກຜັດສະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບທີ່ເປັນກາຍຍະກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ເປັນກຸສົນທີ່ວິບປະຍຸດຈາກຜັດສະແມ່ນບໍ?

ປຣ. ແມ່ນ

ສກ. ສັດທາຍະຕະນະ ຯລຯ ຄັນທາຍະຕະນະ ຯລຯ ຣະສາຍະຕະນະຯລຯ ໂຜດຖັບພາຍະຕະນະ ຯລຯ ປະຖະວີທາດ ຯລຯ ອາໂປທາດ ຯລຯ ເຕໂຊທາດ ຯລຯ ວາໂຍທາດ ທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ເປັນກຸສົນທີ່ວິບປະຍຸດຈາກຜັດສະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູປາຍະຕະນະທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ເປັນອັບພະຍາກະຕະທີ່ວິບປະຍຸດຈາກຜັດສະແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນກາຍຍະກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ເປັນອັບພະຍາກະຕະທີ່ວິບປະຍຸດຈາກຜັດສະແມ່ນບໍ?

ປຣ. ບໍ່ຄວນກ່າວແບວນັ້ນ ຯລຯ

ສກ. ສັດທາຍະຕະນະ ຯລຯ ຄັນທາຍະຕະນະ ຯລຯ ຣະສາຍະຕະນະຯລຯ ໂຜດຖັບພາຍະຕະນະ ຯລຯ ປະຖະວີທາດ ຯລຯ ອາໂປທາດ ຯລຯ ເຕໂຊທາດ ຯລຯ ວາໂຍທາດ ທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ເປັນອັບພະຍາກະຕະທີ່ວິບປະຍຸດຈາກຜັດສະແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນກາຍຍະກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ເປັນອັບພະຍາກະຕະທີ່ວິບປະຍຸດຈາກຜັດສະແມ່ນບໍ?

ປຣ. ບໍ່ຄວນກ່າວແບວນັ້ນ ຯລຯ

[໔໓໑] ສກ. ຮູບທີ່ເປັນກາຍຍະກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ຮັບຮູ້ອາລົມບໍ່ໄດ້ ເປັນກຸສົນທີ່ວິບປະຍຸດຈາກຜັດສະແມ່ນບໍ?

ປຣ. ແມ່ນ

ສກ. ຮູປາຍະຕະນະທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ຮັບຮູ້ອາລົມບໍ່ໄດ້ ເປັນກຸສົນທີ່ວິບປະຍຸດ ຈາກຜັດສະແມ່ນບໍ?

ປຣ. ບໍ່ຄວນກ່າວແບວນັ້ນ ຯລຯ

ສກ. ຮູບທີ່ເປັນກາຍຍະກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ຮັບຮູ້ອາລົມບໍ່ໄດ້ເປັນກຸສົນ ທີ່ວິບປະຍຸດຈາກຜັດສະແມ່ນບໍ?

ປຣ. ແມ່ນ

ສກ. ສັດທາຍະຕະນະ ຯລຯ ຄັນທາຍະຕະນະ ຯລຯ ຣະສາຍະຕະນະຯລຯ ໂຜດຖັບພາຍະຕະນະ ຯລຯ ປະຖະວີທາດ ຯລຯ ອາໂປທາດ ຯລຯ ເຕໂຊທາດ ຯລຯ ວາໂຍທາດ ທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ຮັບຮູ້ອາລົມບໍ່ໄດ້ ເປັນກຸສົນທີ່ວິບປະຍຸດຈາກຜັດສະແມ່ນບໍ?

ປຣ. ບໍ່ຄວນກ່າວແບວນັ້ນ ຯລຯ

ສກ. ຮູປາຍະຕະນະທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ຮັບຮູ້ອາລົມບໍ່ໄດ້ ເປັນອັບພະຍາກະຕະ ທີ່ວິບປະຍຸດຈາກຜັດສະແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນກາຍຍະກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ຮັບຮູ້ອາລົມບໍ່ໄດ້ ເປັນອັບພະຍາກະຕະທີ່ວິບປະຍຸດຈາກຜັດສະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ສັດທາຍະຕະນະ ฯລฯ ຄັນທາຍະຕະນະ ฯລฯ ຣະສາຍະຕະນະ ฯລฯ ໂຜດຖັບພາຍະຕະນະ ฯລฯ ປະຖະວີທາດ ฯລฯ ອາໂປທາດ ฯລฯ ເຕໂຊທາດ ฯລฯ ວາໂຍທາດ ທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ຮັບຮູ້ອາລົມບໍ່ໄດ້ ເປັນອັບພະຍາກະຕະທີ່ວິບປະຍຸດຈາກຜັດສະແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນກາຍຍະກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ຮັບຮູ້ອາລົມບໍ່ໄດ້ ເປັນອັບພະຍາກະຕະ ທີ່ວິບປະຍຸດຈາກຜັດສະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໕໓໔] ສກ. ຮູບທີ່ເປັນວະຈີກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ເປັນກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນວະຈີກຳເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ฯລฯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຮູບທີ່ເປັນວະຈີກຳເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ฯລฯ ບໍ່ມີຄວາມຕັ້ງໃຈບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຮູບທີ່ເປັນວະຈີກຳເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ฯລฯ ບໍ່ມີຄວາມຕັ້ງໃຈ ທ່ານກໍບໍ່ຄວນຍອມຮັບວ່າ "ຮູບທີ່ເປັນວະຈີກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ເປັນກຸສົນ"

ສກ. ຜັດສະທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ເປັນກຸສົນ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ฯລฯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນວະຈີກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ເປັນກຸສົນ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ฯລฯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ເວທະນາ ฯລฯ ສັນຍາ ฯລฯ ເຈຕະນາ ฯລฯ ສັດທາ ฯລฯ ວິຣິຍະ ฯລฯ ສະຕິ ฯລฯ ສະມາທິ ฯລฯ ປັນຍາ ທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ເປັນກຸສົນ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ฯລฯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນວະຈີກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ເປັນກຸສົນ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ฯລฯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຮູບທີ່ເປັນວະຈີກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ເປັນກຸສົນ ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ฯລฯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ຜັດສະທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ເປັນກຸສົນ ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ฯລฯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຮູບທີ່ເປັນວະຈີກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ເປັນກຸສົນ ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ฯລฯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ເວທະນາ ฯລฯ ສັນຍາ ฯລฯ ເຈຕະນາ ฯລฯ ສັດທາ ฯລฯ ວິຣິຍະ ฯລฯ ສະຕິ ฯລฯ ສະມາທິ ฯລฯ ປັນຍາ ທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ເປັນກຸສົນ ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ฯລฯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຮູບທີ່ເປັນວະຈີກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ເປັນກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເກີດຂຶ້ນດ້ວຍຈິດທີ່ເປັນກຸສົນ ທັງໝົດນັ້ນເປັນກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ເພິ່ງອະທິບາຍຮູບທີ່ເປັນວະຈີກຳໃຫ້ພິດສະດານເໝືອນຮູບທີ່ເປັນກາຍຍະກຳ

[໔໓໑] ສກ. ຮູບທີ່ເປັນກາຍຍະກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ເປັນອະກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນກາຍຍະກຳເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ມີຄວາມຜູກໃຈ ມີຄວາມສົນໃຈ ມີຄວາມໃຝ່ໃຈ ມີຄວາມຈົງໃຈ ມີຄວາມປາຖະໜາ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຮູບທີ່ເປັນກາຍຍະກຳເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ບໍ່ມີຄວາມຜູກໃຈ ບໍ່ມີຄວາມສົນໃຈ ບໍ່ມີຄວາມໃຝ່ໃຈ ບໍ່ມີຄວາມຈົງໃຈ ບໍ່ມີຄວາມປາຖະໜາ ບໍ່ມີຄວາມຕັ້ງໃຈບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຮູບທີ່ເປັນກາຍຍະກຳເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ບໍ່ມີຄວາມຜູກໃຈ ບໍ່ມີຄວາມສົນໃຈ ບໍ່ມີຄວາມໃຝ່ໃຈ ບໍ່ມີຄວາມຈົງໃຈ ບໍ່ມີຄວາມປາຖະໜາ ບໍ່ມີຄວາມຕັ້ງໃຈ ທ່ານກໍບໍ່ຄວນຍອມຮັບວ່າ "ຮູບທີ່ເປັນກາຍຍະກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນເປັນອະກຸສົນ"

ສກ. ຜັດສະທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ເປັນອະກຸສົນ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນກາຍຍະກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ເປັນອະກຸສົນ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເວທະນາ ຯລຯ ສັນຍາ ຯລຯ ເຈຕະນາ ຯລຯ ຣາຄະ ຯລຯ ໂທສະ ຯລຯ ໂມຫະ ຯລຯ ມານະ ຯລຯ ທິດຖິ ຯລຯ ວິຈິກິດສາ ຯລຯ ຖີນະ ຯລຯ ອຸດທັດຈະ ຯລຯ ອະຫິຣິກະ ຯລຯ ອະໂນດຕັບປະ ທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ເປັນອະກຸສົນ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນກາຍຍະກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ເປັນອະກຸສົນ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບທີ່ເປັນກາຍຍະກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ເປັນອະກຸສົນ ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ຜັດສະທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ເປັນອະກຸສົນ ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບທີ່ເປັນກາຍຍະກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ເປັນອະກຸສົນ ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ເວທະນາ ຯລຯ ສັນຍາ ຯລຯ ເຈຕະນາ ຯລຯ ຣາຄະ ຯລຯ ໂທສະ ຯລຯ ໂມຫະ ຯລຯ ມານະ ຯລຯ ທິດຖິ ຯລຯ ວິຈິກິດສາ ຯລຯ ຖີນະ ຯລຯ ອຸດທັດຈະ ຯລຯ ອະຫິຣິກະ ຯລຯ ອະໂນດຕັບປະ ທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ເປັນອະກຸສົນ ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບທີ່ເປັນກາຍຍະກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ເປັນອະກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ທັງໝົດນັ້ນເປັນອະກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໓໔] ສກ. ຮູບທີ່ເປັນວະຈີກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ເປັນອະກຸສົນ ແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນວະຈີກຳເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບທີ່ເປັນວະຈີກຳເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ຫາກຮູບທີ່ເປັນວະຈີກຳເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈ ທ່ານກໍບໍ່ຄວນຍອມຮັບວ່າ “ຮູບທີ່ເປັນວະຈີກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ເປັນອະກຸສົນ”

ສກ. ຜັດສະທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ເປັນອະກຸສົນ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນວະຈີກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ເປັນອະກຸສົນ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເວທະນາ ຯລຯ ສັນຍາ ຯລຯ ເຈຕະນາ ຯລຯ ຣາຄະ ຯລຯ ໂທສະ ຯລຯ ໂມຫະ ຯລຯ ມານະ ຯລຯ ທິດຖິ ຯລຯ ວິຈິກິດສາ ຯລຯ ຖີນະ ຯລຯ ອຸດທັດຈະ ຯລຯ ອະຫິຣິກະ ຯລຯ ອະໂນດຕັບປະ ທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ເປັນອະກຸສົນ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນວະຈີກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ເປັນອະກຸສົນ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບທີ່ເປັນວະຈີກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ເປັນອະກຸສົນ ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ຜັດສະທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ເປັນອະກຸສົນ ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບທີ່ເປັນວະຈີກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ເປັນອະກຸສົນ ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ເວທະນາ ຯລຯ ສັນຍາ ຯລຯ ເຈຕະນາ ຯລຯ ຣາຄະ ຯລຯ ໂທສະ ຯລຯ ໂມຫະ ຯລຯ ມານະ ຯລຯ ທິດຖິ ຯລຯ ວິຈິກິດສາ ຯລຯ ຖີນະ ຯລຯ ອຸດທັດຈະ ຯລຯ ອະຫິຣິກະ ຯລຯ ອະໂນດຕັບປະ ທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ເປັນອະກຸສົນ ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບທີ່ເປັນວະຈີກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ເປັນອະກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ທັງໝົດນັ້ນເປັນອະກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໙໕] ສກ. ຮູບທີ່ເປັນວະຈີກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນເປັນອະກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ຮູປາຍະຕະນະທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ເປັນອະກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບທີ່ເປັນວະຈີກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ເປັນອະກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ສັດທາຍະຕະນະ ຯລຯ ຄັນທາຍະຕະນະ ຯລຯ ຣະສາຍະຕະນະ ຯລຯ ໂຜດຖັບພາຍະຕະນະ ຯລຯ ປະຖະວີທາດ ຯລຯ ອາໂປທາດ ຯລຯ ເຕໂຊທາດ ຯລຯ ວາໂຍທາດ ຯລຯ ອະສຸຈິ ຯລຯ ນ້ຳຕາ ຯລຯ ເລືອດ ຯລຯ ເຫື່ອ ທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ເປັນອະກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູປາຍະຕະນະທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ເປັນອັບພະຍາກະຕະແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນວະຈີກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ເປັນອັບພະຍາກະຕະ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ສັດທາຍະຕະນະ ฯລฯ ຄັນທາຍະຕະນະ ฯລฯ ຣະສາຍະຕະນະ ฯລฯ ໂຜດຖັບພາຍະຕະນະ ฯລฯ ປະຖະວີທາດ ฯລฯ ອາໂປທາດ ฯລฯ ເຕໂຊທາດ ฯລฯ ວາໂຍທາດ ฯລฯ ອະສຸຈິ ฯລฯ ນ້ຳຕາ ฯລฯ ເລືອດ ฯລฯ ເຫື່ອ ທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ເປັນອັບພະຍາກະຕະແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນວະຈີກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ເປັນອັບພະຍາກະຕະ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໔໕໖] ສກ. ຮູບທີ່ເປັນວະຈີກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ຮັບຮູ້ອາລົມບໍ່ໄດ້ ເປັນອະກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ຮູປາຍະຕະນະທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ຮັບຮູ້ອາລົມບໍ່ໄດ້ ເປັນອະກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຮູບທີ່ເປັນວະຈີກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ຮັບຮູ້ອາລົມບໍ່ໄດ້ ເປັນອະກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ສັດທາຍະຕະນະ ฯລฯ ຄັນທາຍະຕະນະ ฯລฯ ຣະສາຍະຕະນະฯລฯ ໂຜດຖັບພາຍະຕະນະ ฯລฯ ປະຖະວີທາດ ฯລฯ ອາໂປທາດ ฯລฯ ເຕໂຊທາດ ฯລฯ ວາໂຍທາດ ฯລฯ ອະສຸຈິ ฯລฯ ນ້ຳຕາ ฯລฯ ເລືອດ ฯລฯ ເຫື່ອ ທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ຮັບຮູ້ອາລົມບໍ່ໄດ້ ເປັນອະກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຮູປາຍະຕະນະທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ຮັບຮູ້ອາລົມບໍ່ໄດ້ ເປັນອັບພະຍາກະຕະ ແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນວະຈີກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ຮັບຮູ້ອາລົມບໍ່ໄດ້ເປັນອັບພະຍາກະຕະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ສັດທາຍະຕະນະ ฯລฯ ຄັນທາຍະຕະນະ ฯລฯ ຣະສາຍະຕະນະฯລฯ ໂຜດຖັບພາຍະຕະນະ ฯລฯ ປະຖະວີທາດ ฯລฯ ອາໂປທາດ ฯລฯ ເຕໂຊທາດ ฯລฯ ວາໂຍທາດ

ໆລໆ ອະສຸຈິ ໆລໆ ນ້ຳຕາ ໆລໆ ເລືອດ ໆລໆ ເຫື່ອ ທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ຮັບຮູ້ອາລົມບໍ່ໄດ້ ເປັນອັບພະຍາກະຕະແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນວະຈີກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ຮັບຮູ້ອາລົມບໍ່ໄດ້ເປັນອັບພະຍາກະຕະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

[໔໕໗] ສກ. ຮູບທີ່ເປັນວະຈີກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ເປັນອະກຸສົນທີ່ວິບປະຍຸດຈາກຜັດສະແມ່ນບໍ?

ປຣ. ແມ່ນ

ສກ. ຮູປາຍະຕະນະທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ເປັນອະກຸສົນທີ່ວິບປະຍຸດຈາກຜັດສະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ຮູບທີ່ເປັນວະຈີກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ເປັນອະກຸສົນທີ່ວິບປະຍຸດຈາກຜັດສະແມ່ນບໍ?

ປຣ. ແມ່ນ

ສກ. ສັດທາຍະຕະນະ ໆລໆ ຄັນທາຍະຕະນະ ໆລໆ ຣະສາຍະຕະນະ ໆລໆ ໂຜດຖັບພາຍະຕະນະ ໆລໆ ປະຖະວີທາດ ໆລໆ ອາໂປທາດ ໆລໆ ເຕໂຊທາດ ໆລໆ ວາໂຍທາດ ໆລໆ ອະສຸຈິ ໆລໆ ນ້ຳຕາ ໆລໆ ເລືອດ ໆລໆ ເຫື່ອ ທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ເປັນອະກຸສົນທີ່ວິບປະຍຸດຈາກຜັດສະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ຮູປາຍະຕະນະທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ເປັນອັບພະຍາກະຕະທີ່ວິບປະຍຸດຈາກຜັດສະແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນວະຈີກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ຮັບຮູ້ອາລົມບໍ່ໄດ້ ເປັນອັບພະຍາກະຕະທີ່ວິບປະຍຸດຈາກຜັດສະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ສັດທາຍະຕະນະ ໆລໆ ຄັນທາຍະຕະນະ ໆລໆ ຣະສາຍະຕະນະ ໆລໆ ໂຜດຖັບພາຍະຕະນະ ໆລໆ ປະຖະວີທາດ ໆລໆ ອາໂປທາດ ໆລໆ ເຕໂຊທາດ ໆລໆ ວາໂຍທາດ ໆລໆ ອະສຸຈິ ໆລໆ ນ້ຳຕາ ໆລໆ ເລືອດ ໆລໆ ເຫື່ອ ທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ຮັບຮູ້ອາລົມບໍ່ໄດ້ ເປັນອັບພະຍາກະຕະທີ່ວິບປະຍຸດຈາກຜັດສະແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນວະຈີກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ຮັບຮູ້ອາລົມບໍ່ໄດ້ ເປັນອັບພະຍາກະຕະທີ່ວິບປະຍຸດຈາກຜັດສະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບທີ່ເປັນວະຈີກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ຮັບຮູ້ອາລົມບໍ່ໄດ້ ເປັນອະກຸສົນທີ່ວິບປະຍຸດຈາກຜັດສະແມ່ນບໍ?

ປຣ. ແມ່ນ

ສກ. ຮູປາຍະຕະນະທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ຮັບຮູ້ອາລົມບໍ່ໄດ້ ເປັນອະກຸສົນທີ່ວິບປະຍຸດຈາກຜັດສະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບທີ່ເປັນວະຈີກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ຮັບຮູ້ອາລົມບໍ່ໄດ້ ເປັນອະກຸສົນທີ່ວິບປະຍຸດຈາກຜັດສະແມ່ນບໍ?

ປຣ. ແມ່ນ

ສກ. ສັດທາຍະຕະນະ ຯລຯ ຄັນທາຍະຕະນະ ຯລຯ ຣະສາຍະຕະນະ ຯລຯ ໂຜດຖັບພາຍະຕະນະ ຯລຯ ປະຖະວີທາດ ຯລຯ ອາໂປທາດ ຯລຯ ເຕໂຊທາດ ຯລຯ ວາໂຍທາດ ຯລຯ ອະສຸຈິ ຯລຯ ນ້ຳຕາ ຯລຯ ເລືອດ ຯລຯ ເຫື່ອ ທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ຮັບຮູ້ອາລົມບໍ່ໄດ້ ເປັນອະກຸສົນທີ່ວິບປະຍຸດຈາກຜັດສະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູປາຍະຕະນະທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ຮັບຮູ້ອາລົມບໍ່ໄດ້ ເປັນອັບພະຍາກະຕະ ທີ່ວິບປະຍຸດຈາກຜັດສະແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນວະຈີກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ຮັບຮູ້ອາລົມບໍ່ໄດ້ ເປັນອັບພະຍາກະຕະທີ່ວິບປະຍຸດຈາກຜັດສະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສັດທາຍະຕະນະ ຯລຯ ຄັນທາຍະຕະນະ ຯລຯ ຣະສາຍະຕະນະ ຯລຯ ໂຜດຖັບພາຍະຕະນະ ຯລຯ ປະຖະວີທາດ ຯລຯ ອາໂປທາດ ຯລຯ ເຕໂຊທາດ ຯລຯ ວາໂຍທາດ ຯລຯ ອະສຸຈິ ຯລຯ ນ້ຳຕາ ຯລຯ ເລືອດ ຯລຯ ເຫື່ອ ທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ຮັບຮູ້ອາລົມບໍ່ໄດ້ ເປັນອັບພະຍາກະຕະທີ່ວິບປະຍຸດຈາກຜັດສະແມ່ນບໍ?

ປຣ. ແມ່ນ

ສກ. ຮູບທີ່ເປັນວະຈີກຳທີ່ເກີດຂຶ້ນດ້ວຍຈິດທີ່ເປັນອະກຸສົນ ຮັບຮູ້ອາລົມບໍ່ໄດ້ ເປັນອັບພະຍາກະຕະທີ່ວິບປະຍຸດຈາກຜັດສະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໓໘] ປຣ. ທ່ານບໍ່ຍອມຮັບວ່າ "ຮູບເປັນກຸສົນກໍໄດ້ ເປັນອະກຸສົນກໍໄດ້" ແມ່ນບໍ?

ສກ. ແມ່ນ

ປຣ. ກາຍຍະກຳ ວະຈີກຳ ເປັນກຸສົນກໍໄດ້ ເປັນອະກຸສົນກໍໄດ້ ບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກກາຍຍະກຳ ວະຈີກຳ ເປັນກຸສົນກໍໄດ້ ເປັນອະກຸສົນກໍໄດ້ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ຮູບເປັນກຸສົນກໍໄດ້ ເປັນອະກຸສົນກໍໄດ້"

ສກ. ຮູບເປັນກຸສົນກໍໄດ້ ເປັນອະກຸສົນກໍໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂາຍະຕະນະເປັນກຸສົນກໍໄດ້ ເປັນອະກຸສົນກໍໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບເປັນກຸສົນກໍໄດ້ ເປັນອະກຸສົນກໍໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ໂສຕາຍະຕະນະ ຯລຯ ຄານາຍະຕະນະ ຯລຯ ຊິວຫາຍະຕະນະ ຯລຯ ກາຍາຍະຕະນະ ຯລຯ ຮູປາຍະຕະນະ ຯລຯ ສັດທາຍະຕະນະ ຯລຯ ຄັນທາຍະຕະນະ ຯລຯ ຣະສາຍະຕະນະ ຯລຯ ໂຜດຖັບພາຍະຕະນະ ຯລຯ ປະຖະວີທາດ ຯລຯ ອາໂປທາດ ຯລຯ ເຕໂຊທາດ ຯລຯ ວາໂຍທາດ ຯລຯ ອະສຸຈິ ຯລຯ ນ້ຳຕາ ຯລຯ ເລືອດ ຯລຯ ເຫື່ອ ເປັນກຸສົນກໍໄດ້ ເປັນອະກຸສົນກໍໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກາຍເປັນຮູບ ກາຍຍະກຳກໍເປັນຮູບແມ່ນບໍ?

ປຣ. ແມ່ນ

ສກ. ມະໂນເປັນຮູບ ມະໂນກຳກໍເປັນຮູບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ມະໂນເປັນນາມ ມະໂນກຳກໍເປັນນາມແມ່ນບໍ?

ປຣ. ແມ່ນ

ສກ. ກາຍເປັນນາມ ກາຍຍະກຳກໍເປັນນາມແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກາຍເປັນຮູບ ແຕ່ກາຍຍະກຳເປັນນາມແມ່ນບໍ?

ປຣ. ແມ່ນ

ສກ. ມະໂນເປັນຮູບ ແຕ່ມະໂນກຳເປັນນາມແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ມະໂນເປັນນາມ ມະໂນກຳກໍເປັນນາມແມ່ນບໍ?

ປຣ. ແມ່ນ

ສກ. ກາຍເປັນນາມ ກາຍຍະກຳກໍເປັນນາມແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກາຍເປັນຮູບ ຍ້ອນເຫດນັ້ນ ກາຍຍະກຳຈຶ່ງເປັນຮູບແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂາຍະຕະນະເປັນຮູບ ຍ້ອນເຫດນັ້ນ ຈັກຂຸວິນຍານຈຶ່ງເປັນຮູບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກາຍເປັນຮູບ ຍ້ອນເຫດນັ້ນ ກາຍຍະກຳຈຶ່ງເປັນຮູບແມ່ນບໍ?

ປຣ. ແມ່ນ

ສກ. ໂສຕາຍະຕະນະເປັນຮູບ ຍ້ອນເຫດນັ້ນ ໂສຕະວິນຍານຈຶ່ງເປັນຮູບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກາຍເປັນຮູບ ຍ້ອນເຫດນັ້ນ ກາຍຍະກຳຈຶ່ງເປັນຮູບແມ່ນບໍ?

ປຣ. ແມ່ນ

ສກ. ຄານາຍະຕະນະເປັນຮູບ ຍ້ອນເຫດນັ້ນ ຄານະວິນຍານຈຶ່ງເປັນຮູບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກາຍເປັນຮູບ ຍ້ອນເຫດນັ້ນ ກາຍຍະກຳຈຶ່ງເປັນຮູບແມ່ນບໍ?

ປຣ. ແມ່ນ

ສກ. ຊິວຫາຍະຕະນະເປັນຮູບ ຍ້ອນເຫດນັ້ນ ຊິວຫາວິນຍານຈຶ່ງເປັນຮູບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກາຍເປັນຮູບ ຍ້ອນເຫດນັ້ນ ກາຍຍະກຳຈຶ່ງເປັນຮູບແມ່ນບໍ?

ປຣ. ແມ່ນ

ສກ. ກາຍາຍະຕະນະເປັນຮູບ ຍ້ອນເຫດນັ້ນ ກາຍວິນຍານຈຶ່ງເປັນຮູບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໕໙] ສກ. ຮູບເປັນກຳແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ເຮົາກ່າວເຈຕະນາວ່າເປັນຕົວກຳ ບຸກຄົນຄິດແລ້ວຈຶ່ງກະທຳກຳ ດ້ວຍກາຍ ວາຈາ ໃຈ" ມີຢູ່ຈິງ ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ຮູບເປັນກຳ"

ສກ. ຮູບເປັນກຳແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ອານົນ ເມື່ອກາຍມີຢູ່ ສຸກແລະທຸກ ອັນເປັນພາຍໃນຈຶ່ງເກີດຂຶ້ນ ຍ້ອນກາຍະສັນເຈຕະນາ (ຄວາມຈົງໃຈທາງກາຍ) ເປັນເຫດ ຫຼືວ່າ ເມື່ອວາຈາມີຢູ່ ສຸກແລະທຸກອັນເປັນພາຍໃນຈຶ່ງເກີດຂຶ້ນ ຍ້ອນວະຈີສັນເຈຕະນາ (ຄວາມຈົງໃຈ ທາງວາຈາ) ເປັນເຫດ ຫຼື ວ່າ ເມື່ອໃຈມີຢູ່ ສຸກແລະທຸກອັນເປັນພາຍໃນ ຈຶ່ງເກີດຂຶ້ນ ຍ້ອນມະ ໂນສັນເຈຕະນາ (ຄວາມຈົງໃຈທາງໃຈ) ເປັນເຫດ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ຮູບເປັນກຳ"

ສກ. ຮູບເປັນກຳແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ກາຍສັນເຈຕະນາ ໓ ຢ່າງ ເປັນກາຍຍະກຳຝ່າຍອະກຸສົນ ມີທຸກເປັນກຳໄລ ມີທຸກເປັນວິບາກ ວະຈີສັນເຈຕະນາ ໔ ຢ່າງ ເປັນວະຈີກຳຝ່າຍອະກຸສົນ ມີທຸກເປັນກຳໄລ ມີທຸກເປັນວິບາກ ມະໂນສັນເຈຕະນາ ໓ ຢ່າງ ເປັນມະໂນກຳຝ່າຍອະກຸສົນ ມີທຸກເປັນກຳໄລ ມີທຸກເປັນວິບາກ ພິກຂຸທັງຫຼາຍ ກາຍສັນເຈຕະນາ ໓ ຢ່າງ ເປັນກາຍຍະກຳຝ່າຍກຸສົນ ມີສຸກເປັນກຳໄລ ມີສຸກເປັນວິບາກ ວະຈີສັນເຈຕະນາ ໔ ຢ່າງ ເປັນວະຈີກຳຝ່າຍກຸສົນ ມີສຸກເປັນກຳໄລ ມີສຸກເປັນວິບາກ ມະໂນສັນເຈຕະນາ ໓ ຢ່າງ ເປັນມະ ໂນກຳຝ່າຍກຸສົນ ມີສຸກເປັນກຳໄລ ມີສຸກເປັນວິບາກ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ຮູບເປັນກຳ"

ສກ. ຮູບເປັນກຳແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ອານົນ ຖ້າໂມຄະບຸຣຸດນາມວ່າສະມິດ ທີນີ້ ຖືກປາຕະລິບຸດປະຣິພາຊົກຖາມແນວນີ້ ຈະເພິ່ງຕອບແນວນີ້ວ່າ ທ່ານປາຕະລິບຸດ ບຸກຄົນ ເຮັດກຳທີ່ປະກອບດ້ວຍຄວາມຈົງໃຈທາງກາຍ ທາງວາຈາ ແລະທາງໃຈ ອັນໃຫ້ຜົນເປັນສຸກ ຍ່ອມສະເຫວີຍສຸກ ບຸກຄົນເຮັດກຳທີ່ປະກອບດ້ວຍຄວາມຈົງໃຈທາງກາຍ ທາງວາຈາແລະທາງ ໃຈ ອັນໃຫ້ຜົນເປັນທຸກ ຍ່ອມສະເຫວີຍທຸກ ບຸກຄົນເຮັດກຳທີ່ປະກອບດ້ວຍຄວາມຈົງໃຈທາງກາຍ ທາງວາຈາ ແລະທາງໃຈ ອັນໃຫ້ຜົນເປັນອະທຸກຂະມະສຸຂະ ຍ່ອມສະເຫວີຍຜົນເປັນອະທຸກຂະ ມະສຸຂະ ອານົນ ໂມຄະບຸຣຸດນາມວ່າ ສະມິດທິເມື່ອຕອບແນວນີ້ ຊື່ວ່າຕອບໂດຍຊອບແກ່ປາຕະ ລິບຸດປະຣິພາຊົກ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ຮູບເປັນກຳ"

**ຮູບັງກຳມັນຕິກະຖາ ຈົບ**

# ໑໐. ຊີວິຕິນທະຣິຍະກະຖາ (໗໔)

## ວ່າດ້ວຍຊີວິຕິນຊີ

[໔໔໐] ສກ. ຊີວິຕິນຊີທີ່ເປັນຮູບບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ອາຍຸ ຄວາມດຳລົງຢູ່ ຄວາມເປັນໄປ ກິຣິຍາທີ່ເປັນໄປ ອາການທີ່ສືບຕໍ່ ຄວາມເປັນຢູ່ ຄວາມຫຼໍ່ລ້ຽງ ບໍ່ມີແກ່ສະພາວະທຳທີ່ມີຮູບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອາຍຸ ຄວາມດຳລົງຢູ່ ຄວາມເປັນໄປ ກິຣິຍາທີ່ເປັນໄປ ອາການທີ່ສືບຕໍ່ ຄວາມເປັນຢູ່ ຄວາມຫຼໍ່ລ້ຽງ ມີຢູ່ແກ່ສະພາວະທຳທີ່ມີຮູບແມ່ນບໍ?

ປຣ. ແມ່ນ

ສກ. ຫາກອາຍຸ ຄວາມດຳລົງຢູ່ ຄວາມເປັນໄປ ກິຣິຍາທີ່ເປັນໄປ ອາການທີ່ສືບຕໍ່ ຄວາມເປັນຢູ່ຄວາມຫຼໍ່ລ້ຽງ ມີຢູ່ແກ່ສະພາວະທຳທີ່ມີຮູບ ທ່ານກໍບໍ່ຄວນຍອມຮັບວ່າ "ຊີວິຕິນຊີທີ່ເປັນຮູບບໍ່ມີ"

ສກ. ອາຍຸ ຄວາມດຳລົງຢູ່ ຄວາມເປັນໄປ ກິຣິຍາທີ່ເປັນໄປ ອາການທີ່ສືບຕໍ່ ຄວາມເປັນຢູ່ ຄວາມຫຼໍ່ລ້ຽງ ມີຢູ່ແກ່ສະພາວະທຳທີ່ບໍ່ມີຮູບ ຊີວິຕິນຊີທີ່ບໍ່ເປັນຮູບຈຶ່ງມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ອາຍຸ ຄວາມດຳລົງຢູ່ ຄວາມເປັນໄປ ກິຣິຍາທີ່ເປັນໄປ ອາການທີ່ສືບຕໍ່ ຄວາມເປັນຢູ່ ຄວາມຫຼໍ່ລ້ຽງມີຢູ່ແກ່ສະພາວະທຳທີ່ມີຮູບ ຊີວິຕິນຊີທີ່ເປັນຮູບຈຶ່ງມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອາຍຸ ຄວາມດຳລົງຢູ່ ຄວາມເປັນໄປ ກິຣິຍາທີ່ເປັນໄປ ອາການທີ່ສືບຕໍ່ ຄວາມເປັນຢູ່ ຄວາມຫຼໍ່ລ້ຽງມີຢູ່ແກ່ສະພາວະທຳທີ່ມີຮູບ ແຕ່ຊີວິຕິນຊີທີ່ເປັນຮູບບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ອາຍຸ ຄວາມດຳລົງຢູ່ ຄວາມເປັນໄປ ກິຣິຍາທີ່ເປັນໄປ ອາການທີ່ສືບຕໍ່ ຄວາມເປັນຢູ່ ຄວາມຫຼໍ່ລ້ຽງ ມີຢູ່ແກ່ສະພາວະທຳທີ່ບໍ່ມີຮູບ ແຕ່ຊີວິຕິນຊີທີ່ບໍ່ເປັນຮູບບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອາຍຸຂອງສະພາວະທຳທີ່ບໍ່ມີຮູບ ເປັນຊີວິຕິນຊີທີ່ບໍ່ເປັນຮູບແມ່ນບໍ?

ປຣ. ແມ່ນ

ສກ. ອາຍຸຂອງສະພາວະທຳທີ່ມີຮູບ ເປັນຊີວິຕິນຊີທີ່ເປັນຮູບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອາຍຸຂອງສະພາວະທຳທີ່ມີຮູບທ່ານບໍ່ຍອມຮັບວ່າ "ເປັນຊີວິຕິນຊີທີ່ເປັນຮູບ" ແມ່ນບໍ?

ປຣ. ແມ່ນ

ສກ. ອາຍຸຂອງສະພາວະທຳທີ່ບໍ່ມີຮູບ ທ່ານບໍ່ຍອມຮັບວ່າ "ເປັນຊີວິຕິນຊີທີ່ບໍ່ເປັນຮູບ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໔໔໑] ສກ. ອາຍຸຂອງສະພາວະທຳທີ່ມີຮູບ ເປັນຊີວິຕິນຊີທີ່ບໍ່ເປັນຮູບແມ່ນບໍ?

ປຣ. ແມ່ນ

ສກ. ອາຍຸຂອງສະພາວະທຳທີ່ບໍ່ມີຮູບ ເປັນຊີວິຕິນຊີທີ່ເປັນຮູບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ອາຍຸຂອງສະພາວະທຳທີ່ບໍ່ມີຮູບ ທ່ານບໍ່ຍອມຮັບວ່າ "ເປັນຊີວິຕິນຊີທີ່ເປັນຮູບ" ແມ່ນບໍ?

ປຣ. ແມ່ນ

ສກ. ອາຍຸຂອງສະພາວະທຳທີ່ມີຮູບ ທ່ານບໍ່ຍອມຮັບວ່າ "ເປັນຊີວິຕິນຊີທີ່ບໍ່ເປັນຮູບ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ອາຍຸຂອງສະພາວະທຳທັງທີ່ມີຮູບແລະບໍ່ມີຮູບ ເປັນຊີວິຕິນຊີທີ່ບໍ່ເປັນຮູບ ແມ່ນບໍ?

ປຣ. ແມ່ນ

ສກ. ອາຍຸຂອງສະພາວະທຳທັງທີ່ເປັນຮູບແລະບໍ່ເປັນຮູບ ເປັນຊີວິຕິນຊີທີ່ເປັນຮູບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ອາຍຸຂອງສະພາວະທຳທັງທີ່ເປັນຮູບແລະບໍ່ເປັນຮູບ ທ່ານບໍ່ຍອມຮັບວ່າ "ເປັນຊີວິຕິນຊີທີ່ເປັນຮູບ" ແມ່ນບໍ?

ປຣ. ແມ່ນ

ສກ. ອາຍຸຂອງສະພາວະທຳທັງທີ່ເປັນຮູບ ແລະບໍ່ເປັນຮູບ ທ່ານບໍ່ຍອມຮັບວ່າ "ເປັນຊີວິຕິນຊີທີ່ບໍ່ເປັນຮູບ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຊີວິຕິນຊີທີ່ເປັນຮູບບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ເຂົ້ານິໂຣທະສະມາບັດບໍ່ມີຊີວິຕິນຊີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໔໔໒] ສກ. ບຸກຄົນຜູ້ເຂົ້ານິໂຣທະສະມາບັດມີຊີວິຕິນຊີແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນຜູ້ເຂົ້ານິໂຣທະສະມາບັດມີຊີວິຕິນຊີຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ຊີວິຕິນຊີທີ່ເປັນຮູບບໍ່ມີ"

ສກ. ບຸກຄົນຜູ້ເຂົ້ານິໂຣທະສະມາບັດມີຊີວິຕິນຊີແມ່ນບໍ?

ປຣ. ແມ່ນ

ສກ. ຊີວິຕິນຊີນັ້ນນັບເນື່ອງໃນຂັນໃດ?

ປຣ. ນັບເນື່ອງໃນສັງຂານຂັນ

ສກ. ບຸກຄົນຜູ້ເຂົ້ານິໂຣທະສະມາບັດມີສັງຂານຂັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ເຂົ້ານິໂຣທະສະມາບັດມີສັງຂານຂັນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ເຂົ້ານິໂຣທະສະມາບັດມີເວທະນາຂັນ ຯລຯ ສັນຍາຂັນ ຯລຯ ວິນຍານຂັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ເຂົ້ານິໂຣທະສະມາບັດມີເວທະນາຂັນ ຯລຯ ສັນຍາຂັນ ຯລຯ ວິນຍານຂັນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ບໍ່ເຂົ້ານິໂຣທະສະມາບັດມີເວທະນາຂັນ ຯລຯ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໔໓] ສກ. ຊີວິຕິນຊີທີ່ເປັນຮູບບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ອະສັນຍະສັດບໍ່ມີຊີວິຕິນຊີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະສັນຍະສັດມີຊີວິຕິນຊີແມ່ນບໍ?

ປຣ. ແມ່ນ

ສກ. ຫາກອະສັນຍະສັດມີຊີວິຕິນຊີ ທ່ານກໍບໍ່ຄວນຍອມຮັບວ່າ "ຊີວິຕິນຊີທີ່ເປັນຮູບບໍ່ມີ"

ສກ. ອະສັນຍະສັດມີຊີວິຕິນຊີແມ່ນບໍ?

ປຣ. ແມ່ນ

ສກ. ຊີວິຕິນຊີນັບເນື່ອງໃນຂັນໃດ?

ປຣ. ນັບເນື່ອງໃນສັງຂານຂັນ

ສກ. ອະສັນຍະສັດມີສັງຂານຂັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະສັນຍະສັດມີສັງຂານຂັນແມ່ນບໍ?

ປຣ. ແມ່ນ

ສກ. ອະສັນຍະສັດມີເວທະນາຂັນ ຯລຯ ສັນຍາຂັນ ຯລຯ ວິນຍານຂັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະສັນຍະສັດມີເວທະນາຂັນ ຯລຯ ສັນຍາຂັນ ຯລຯ ວິນຍານຂັນແມ່ນບໍ?

ປຣ. ແມ່ນ

ສກ. ພົບແຫ່ງອະສັນຍະສັດເປັນພົບທີ່ມີຂັນ ໕ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໕໔໔] ສກ. ເມື່ອປະຕິສົນທິຈິດດັບໄປ ຊີວິຕິນຊີທີ່ເກີດຂຶ້ນດ້ວຍປະຕິສົນທິຈິດ ຍ່ອມແຕກດັບໄປສ່ວນໜຶ່ງແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອປະຕິສົນທິຈິດດັບ ຜັດສະທີ່ເກີດຂຶ້ນດ້ວຍປະຕິສົນທິຈິດ ຍ່ອມແຕກດັບໄປສ່ວນໜຶ່ງໄປແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອປະຕິສົນທິຈິດດັບໄປ ຜັດສະທີ່ເກີດຂຶ້ນດ້ວຍປະຕິສົນທິຈິດຍ່ອມແຕກດັບໄປທັງໝົດ ແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອປະຕິສົນທິຈິດດັບໄປ ຊີວິຕິນຊີທີ່ເກີດດ້ວຍປະຕິສົນທິຈິດ ຍ່ອມແຕກດັບໄປທັງໝົດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໕໔໕] ປຣ. ຊີວິຕິນຊີມີ ໒ ຢ່າງແມ່ນບໍ?

ສກ. ແມ່ນ

ປຣ. ບຸກຄົນມີຊີວິດຢູ່ດ້ວຍຊີວິຕິນຊີ ໒ ຢ່າງ ຕາຍດ້ວຍຄວາມຕາຍ ໒ ຢ່າງແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

**ຊີວິຕິນທະຣິຍະກະຖາ ຈົບ**

# ໑໑. ກຳມະເຫຕຸກະຖາ (ຫຼອ)

## ວ່າດ້ວຍເຫດແຫ່ງກຳ

[໔໔໖] ສກ. ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນຍ້ອນເຫດແຫ່ງກຳແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂສດາບັນເສື່ອມຈາກໂສດາປັດຕິຜົນ ຍ້ອນເຫດແຫ່ງກຳແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນ ຍ້ອນເຫດແຫ່ງກຳແມ່ນບໍ?

ປຣ. ແມ່ນ

ສກ. ພຣະສະກະທາຄາມີ ໆລໆ ພຣະອະນາຄາມີ ເສື່ອມຈາກອະນາຄາມີຜົນ ຍ້ອນເຫດແຫ່ງກຳແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ພຣະໂສດາບັນບໍ່ເສື່ອມຈາກໂສດາປັດຕິຜົນ ຍ້ອນເຫດແຫ່ງກຳແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນບໍ່ເສື່ອມຈາກອະຣະຫັດຕະຜົນ ຍ້ອນເຫດແຫ່ງກຳແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ພຣະສະກະທາຄາມີ ໆລໆ ພຣະອະນາຄາມີ ບໍ່ເສື່ອມຈາກອະນາຄາມີຜົນ ຍ້ອນເຫດແຫ່ງກຳແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນບໍ່ເສື່ອມຈາກອະຣະຫັດຕະຜົນ ຍ້ອນເຫດແຫ່ງກຳແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນ ຍ້ອນເຫດແຫ່ງກຳແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນເຫດແຫ່ງກຳຄືການຂ້າສັດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ຍ້ອນເຫດແຫ່ງກຳຄືການລັກຊັບ ໆລໆ ຍ້ອນເຫດແຫ່ງກຳຄືການປະພຶດຜິດໃນການ ໆລໆ ຍ້ອນເຫດແຫ່ງກຳຄືການເວົ້າຕົວະ ໆລໆ ຍ້ອນເຫດແຫ່ງກຳຄືການເວົ້າສັບສໍ່ ໆລໆ ຍ້ອນເຫດແຫ່ງກຳຄືການເວົ້າຄຳຫຍາບ ໆລໆ ຍ້ອນເຫດແຫ່ງກຳຄືການເວົ້າໂລເລ ໆລໆ ຍ້ອນເຫດແຫ່ງກຳຄືການຂ້າ ມານດາ ໆລໆ ຍ້ອນເຫດແຫ່ງກຳຄືການຂ້າບິດາ ໆລໆ ຍ້ອນເຫດແຫ່ງກຳຄືການຂ້າພຣະອະຣະຫັນ ໆລໆ ຍ້ອນເຫດແຫ່ງກຳຄືການທຳຮ້າຍພຣະພຸດທະເຈົ້າຈົນພຣະໂລຫິດຫໍ້ ໆລໆ ຍ້ອນເຫດແຫ່ງກຳຄືການທຳລາຍສົງໃຫ້ແຕກກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນ ຍ້ອນເຫດແຫ່ງກໍາອັນໃດ?

ປຣ. ຍ້ອນການກ່າວຕູ່ພຣະອະຣະຫັນທັງຫຼາຍ

ສກ. ພຣະອະຣະຫັນເສື່ອມຈາກອະຣະຫັດຕະຜົນ ຍ້ອນເຫດແຫ່ງກໍາຄືການກ່າວຕູ່ ພຣະອະຣະຫັນທັງຫຼາຍແມ່ນບໍ?

ປຣ. ແມ່ນ

ສກ. ຄົນທຸກຄົນທີ່ກ່າວຕູ່ພຣະອະຣະຫັນທັງຫຼາຍເຮັດໃຫ້ແຈ້ງອະຣະຫັດຕະຜົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

**ກໍາມະເຫຕຸກະຖາ ຈົບ**

**ອັດຖະມະວັກ ຈົບ**

## ລວມກະຖາທີ່ມີໃນວັກນີ້ ຄື

໑. ສະກະຕິກະຖາ
໒. ກາມະຄຸນະກະຖາ
໓. ຣູປະທາຕຸກະຖາ
໔. ຣູປະທາຕຸຍາວາຍະຕະນະກະຖາ
໕. ຣູປັງກໍາມັນຕິກະຖາ
໖. ອັນຕະຣາພະວະກະຖາ
໗. ກາມະກະຖາ
໘. ອະຣູປະທາຕຸກະຖາ
໙. ອະຣູເປຣູປະກະຖາ
໑໐. ຊີວິຕິນທະຣິຍະກະຖາ
໑໑. ກໍາມະເຫຕຸກະຖາ

# ໗. ນະວະມະວັກ

## ໑. ອານິສັງສະທັດສາວີກະຖາ (໗໘)

## ວ່າດ້ວຍຜູ້ເຫັນອານິສົງ (ໃນນິບພານ)

[໕໔໗] ສກ. ບຸກຄົນຜູ້ເຫັນອານິສົງ (ໃນນິບພານ) ລະສັງໂຍດໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ມະນະສິການສັງຂານໂດຍຄວາມເປັນຂອງບໍ່ທ່ຽງ ລະສັງໂຍດໄດ້ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນຜູ້ມະນະສິການສັງຂານໂດຍຄວາມເປັນຂອງບໍ່ທ່ຽງ ລະສັງໂຍດໄດ້ ທ່ານກໍບໍ່ຄວນຍອມຮັບວ່າ "ບຸກຄົນຜູ້ເຫັນອານິສົງ (ໃນນິບພານ) ລະສັງໂຍດໄດ້"

ສກ. ບຸກຄົນຜູ້ມະນະສິການສັງຂານໂດຍຄວາມເປັນທຸກ ຯລຯ ໂດຍຄວາມເປັນໂຣກ ຯລຯ ໂດຍຄວາມເປັນຝີ ຯລຯ ໂດຍຄວາມເປັນຂອງສຽບແທງ ຯລຯ ໂດຍຄວາມເປັນຂອງລຳເຄັນ ຯລຯ ໂດຍຄວາມເປັນອາພາດ ຯລຯ ໂດຍຄວາມເປັນດັ່ງສິ່ງອື່ນ ຯລຯ ໂດຍຄວາມເປັນຂອງເສື່ອມ ຯລຯ ໂດຍຄວາມເປັນສະໜຽດ ຯລຯ ໂດຍຄວາມເປັນເຄື່ອງບຽດບຽນ ຯລຯ ໂດຍຄວາມເປັນໄພ ຯລຯ ໂດຍຄວາມເປັນອຸປະສັກ ຯລຯ ໂດຍຄວາມເປັນຂອງຫວັ່ນໄຫວ ຯລຯ ໂດຍຄວາມເປັນຂອງເປ່ເພ ຯລຯ ໂດຍຄວາມເປັນຂອງບໍ່ຍັ່ງຍືນ ຯລຯ ໂດຍຄວາມບໍ່ເປັນບ່ອນຕ້ານທານ ຯລຯ ໂດຍຄວາມບໍ່ເປັນບ່ອນເຊື່ອງ ຯລຯ ໂດຍຄວາມບໍ່ເປັນບ່ອນເພິ່ງ ຯລຯ ໂດຍຄວາມບໍ່ເປັນບ່ອນອາໄສ ຯລຯ ໂດຍຄວາມເປັນຂອງວ່າງ ຯລຯ ໂດຍຄວາມເປັນຂອງເປົ່າ ຯລຯ ໂດຍຄວາມເປັນຂອງສູນ ຯລຯ ໂດຍຄວາມເປັນອະນັດຕາ ຯລຯ ໂດຍຄວາມເປັນໂທດ ຯລຯ ໂດຍຄວາມເປັນສະພາວະມີຄວາມແປຜັນໄປເປັນທຳມະດາ

ລະສັງໂຍດໄດ້ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນຜູ້ມະນະສິການສັງຂານໂດຍຄວາມເປັນສະພາວະມີຄວາມແປຜັນໄປເປັນທຳມະດາ ລະສັງໂຍດໄດ້ ທ່ານກໍບໍ່ຄວນຍອມຮັບວ່າ "ຜູ້ເຫັນອານິສົງ (ໃນນິບພານ) ລະສັງໂຍດໄດ້"

ສກ. ບຸກຄົນມະນະສິການສັງຂານໂດຍຄວາມເປັນຂອງບໍ່ທ່ຽງ ແລະເຫັນອານິສົງໃນນິບພານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນມະນະສິການສັງຂານໂດຍຄວາມເປັນຂອງບໍ່ທ່ຽງ ແລະເຫັນອານິສົງໃນນິບພານແມ່ນບໍ?

ປຣ. ແມ່ນ

ສກ. ມີການປະຊຸມແຫ່ງຜັດສະ ໔ ຢ່າງ ຯລຯ ຈິດ ໔ ດວງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນມະນະສິການສັງຂານໂດຍຄວາມເປັນທຸກ ຯລຯ ໂດຍຄວາມເປັນໂຣກ ຯລຯ ໂດຍຄວາມເປັນສະພາວະມີຄວາມແປຜັນໄປເປັນທຳມະດາ ແລະເຫັນອານິສົງໃນນິບພານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນມະນະສິການສັງຂານໂດຍຄວາມເປັນສະພາວະມີຄວາມແປຜັນໄປເປັນທຳມະດາ ແລະເຫັນອານິສົງໃນນິບພານແມ່ນບໍ?

ປຣ. ແມ່ນ

ສກ. ມີການປະຊຸມແຫ່ງຜັດສະ ໔ ຢ່າງ ຯລຯ ຈິດ ໔ ດວງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໕໔໗] ປຣ. ທ່ານບໍ່ຍອມຮັບວ່າ "ຜູ້ເຫັນອານິສົງ (ໃນນິບພານ) ລະສັງໂຍດໄດ້" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ພິກຂຸໃນທຳວິໄນນີ້ພິຈາລະນາເຫັນວ່າເປັນສຸກ ໝາຍຮູ້ວ່າເປັນສຸກ ຮູ້ສຶກວ່າເປັນສຸກ ມີໃຈນ້ອມໄປເນືອງ ໆ ສະໝ່ຳສະເໝີ ບໍ່ຂາດໄລຍະ ມີປັນຍາຢັ່ງຮູ້ໃນນິບພານຢູ່" ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ບຸກຄົນຜູ້ເຫັນອານິສົງ (ໃນນິບພານ) ຈຶ່ງລະສັງໂຍດໄດ້

**ອານິສັງສະທັດສາວີກະຖາ ຈົບ**

## ໔. ອະມະຕາຣົມມະນະກະຖາ (໗໕)

## ວ່າດ້ວຍສະພາວະທຳມີອຳມະຕະ (ນິບພານ) ເປັນອາລົມ

[໕໔໘] ສກ. ສັງໂຍດມີອະມະຕະເປັນອາລົມແມ່ນບໍ?

ປຣ. ແມ່ນ

ສກ. ອຳມະຕະເປັນອາລົມຂອງສັງໂຍດ ເປັນອາລົມຂອງຄັນຖະ ເປັນອາລົມຂອງໂອຄະ ເປັນອາລົມຂອງໂຍຄະ ເປັນອາລົມຂອງນິວອນ ເປັນອາລົມຂອງປະຣາມາດ ເປັນອາລົມຂອງອຸປາທານ ເປັນອາລົມຂອງສັງກິເລດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອຳມະຕະບໍ່ເປັນອາລົມຂອງສັງໂຍດ ບໍ່ເປັນອາລົມຂອງຄັນຖະ ຯລຯ ບໍ່ເປັນອາລົມຂອງສັງກິເລດບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກອະມະຕະບໍ່ເປັນອາລົມຂອງສັງໂຍດ ຯລຯ ບໍ່ເປັນອາລົມຂອງສັງກິເລດ ທ່ານກໍບໍ່ຄວນຍອມຮັບວ່າ "ສັງໂຍດມີອະມະຕະເປັນອາລົມ"

ສກ. ຣາຄະພາຣົບອຳມະຕະເກີດຂຶ້ນແມ່ນບໍ?

ປຣ. ແມ່ນ

ສກ. ອຳມະຕະເປັນບ່ອນຕັ້ງແຫ່ງຣາຄະ ເປັນເຫດແຫ່ງຄວາມກຳໜັດ ເປັນເຫດແຫ່ງຄວາມຕ້ອງການ ເປັນເຫດແຫ່ງຄວາມມົວເມົາ ເປັນເຫດແຫ່ງຄວາມຜູກພັນ ເປັນເຫດແຫ່ງຄວາມຫຼົງໃຫຼແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອຳມະຕະບໍ່ເປັນບ່ອນຕັ້ງແຫ່ງຣາຄະ ບໍ່ເປັນເຫດແຫ່ງຄວາມກຳໜັດ ບໍ່ເປັນເຫດແຫ່ງຄວາມຕ້ອງການ ບໍ່ເປັນເຫດແຫ່ງຄວາມມົວເມົາ ບໍ່ເປັນເຫດແຫ່ງຄວາມຜູກພັນ ບໍ່ເປັນເຫດແຫ່ງຄວາມຫຼົງໃຫຼບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກອະມະຕະບໍ່ເປັນບ່ອນຕັ້ງແຫ່ງຣາຄະ ບໍ່ເປັນເຫດແຫ່ງຄວາມກຳໜັດ ບໍ່ເປັນເຫດແຫ່ງຄວາມຕ້ອງການ ບໍ່ເປັນເຫດແຫ່ງຄວາມມົວເມົາ ບໍ່ເປັນເຫດແຫ່ງຄວາມຜູກພັນ ບໍ່ເປັນເຫດແຫ່ງຄວາມຫຼົງໃຫຼ ທ່ານກໍບໍ່ຄວນຍອມຮັບວ່າ "ຣາຄະພາຣົບອຳມະຕະເກີດຂຶ້ນ"

ສກ. ໂທສະພາຣົບອຳມະຕະເກີດຂຶ້ນແມ່ນບໍ?

ປຣ. ແມ່ນ

ສກ. ອຳມະຕະເປັນບ່ອນຕັ້ງແຫ່ງໂທສະ ເປັນບ່ອນຕັ້ງແຫ່ງຄວາມໂກດ ເປັນບ່ອນຕັ້ງແຫ່ງຄວາມກະທົບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອຳມະຕະບໍ່ເປັນບ່ອນຕັ້ງແຫ່ງໂທສະ ບໍ່ເປັນບ່ອນຕັ້ງແຫ່ງຄວາມໂກດ ບໍ່ເປັນບ່ອນຕັ້ງແຫ່ງຄວາມກະທົບບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກອະມະຕະບໍ່ເປັນບ່ອນຕັ້ງແຫ່ງໂທສະ ບໍ່ເປັນບ່ອນຕັ້ງແຫ່ງຄວາມໂກດ ບໍ່ເປັນບ່ອນຕັ້ງແຫ່ງຄວາມກະທົບ ທ່ານກໍບໍ່ຄວນຍອມຮັບວ່າ "ໂທສະພາຣົບອຳມະຕະເກີດຂຶ້ນ"

ສກ. ໂມຫະພາຣົບອຳມະຕະເກີດຂຶ້ນແມ່ນບໍ?

ປຣ. ແມ່ນ

ສກ. ອຳມະຕະເປັນບ່ອນຕັ້ງແຫ່ງໂມຫະ ເຮັດຄວາມບໍ່ຮູ້ ເຮັດຄວາມບໍ່ເຫັນ ເປັນເຫດແຫ່ງຄວາມດັບສະນິດແຫ່ງປັນຍາ ເປັນໄປໃນຝ່າຍທຳລາຍປັນຍາ ບໍ່ເປັນໄປເພື່ອຄວາມດັບກິເລດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອຳມະຕະບໍ່ເປັນບ່ອນຕັ້ງແຫ່ງໂມຫະ ບໍ່ແມ່ນເຮັດຄວາມບໍ່ຮູ້ ບໍ່ແມ່ນເຮັດຄວາມບໍ່ເຫັນ ເກື້ອກູນແກ່ຄວາມຈະເລີນແຫ່ງປັນຍາ ບໍ່ເປັນໄປໃນຝ່າຍທຳລາຍປັນຍາ ເປັນໄປເພື່ອຄວາມດັບກິເລດບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກອະມະຕະບໍ່ເປັນບ່ອນຕັ້ງແຫ່ງໂມຫະ ບໍ່ແມ່ນທຳຄວາມບໍ່ຮູ້ ຯລຯ ເປັນໄປເພື່ອຄວາມດັບກິເລດ ທ່ານກໍບໍ່ຄວນຍອມຮັບວ່າ "ໂມຫະຜາຣົບອຳມະຕະເກີດຂຶ້ນ"

[໕໕໐] ສກ. ສັງໂຍດຜາຣົບຮູບເກີດຂຶ້ນ ຮູບເປັນອາລົມຂອງສັງໂຍດ ເປັນອາລົມຂອງຄັນຖະ ຯລຯ ເປັນອາລົມຂອງສັງກິເລດແມ່ນບໍ?

ປຣ. ແມ່ນ

ສກ. ສັງໂຍດຜາຣົບອຳມະຕະເກີດຂຶ້ນ ອຳມະຕະເປັນອາລົມຂອງສັງໂຍດ ເປັນອາລົມຂອງຄັນຖະ ຯລຯ ເປັນອາລົມຂອງສັງກິເລດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຣາຄະຜາຣົບຮູບເກີດຂຶ້ນ ຮູບເປັນບ່ອນຕັ້ງແຫ່ງຣາຄະ ເປັນເຫດແຫ່ງຄວາມກຳໜັດ ເປັນເຫດແຫ່ງຄວາມຕ້ອງການ ເປັນເຫດແຫ່ງຄວາມມົວເມົາ ເປັນເຫດແຫ່ງຄວາມຜູກພັນ ເປັນເຫດ ແຫ່ງຄວາມຫຼົງໃຫຼແມ່ນບໍ?

ປຣ. ແມ່ນ

ສກ. ຣາຄະຜາຣົບອຳມະຕະເກີດຂຶ້ນ ອຳມະຕະເປັນບ່ອນຕັ້ງແຫ່ງຣາຄະ ຯລຯ ເປັນເຫດແຫ່ງຄວາມຫຼົງໃຫຼແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂທສະຜາຣົບຮູບເກີດຂຶ້ນ ຮູບເປັນບ່ອນຕັ້ງແຫ່ງໂທສະ ເປັນບ່ອນຕັ້ງແຫ່ງຄວາມໂກດ ເປັນບ່ອນຕັ້ງແຫ່ງຄວາມກະທົບແມ່ນບໍ?

ປຣ. ແມ່ນ

ສກ. ໂທສະຜາຣົບອຳມະຕະເກີດຂຶ້ນ ອຳມະຕະເປັນບ່ອນຕັ້ງແຫ່ງໂທສະ ເປັນບ່ອນຕັ້ງແຫ່ງຄວາມໂກດ ເປັນບ່ອນຕັ້ງແຫ່ງຄວາມກະທົບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂມຫະຜາຣົບຮູບເກີດຂຶ້ນ ຮູບເປັນບ່ອນຕັ້ງແຫ່ງໂມຫະ ເຮັດຄວາມບໍ່ຮູ້ ຯລຯ ບໍ່ເປັນໄປເພື່ອຄວາມດັບກິເລດແມ່ນບໍ?

ປຣ. ແມ່ນ

ສກ. ໂມຫະຜາຣົບອຳມະຕະເກີດຂຶ້ນ ອຳມະຕະເປັນບ່ອນຕັ້ງແຫ່ງໂມຫະ ເຮັດຄວາມບໍ່ຮູ້ ຯລຯ ບໍ່ເປັນໄປເພື່ອຄວາມດັບກິເລດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສັງໂຍດຜາຣົບອຳມະຕະເກີດຂຶ້ນ ອຳມະຕະບໍ່ເປັນອາລົມຂອງສັງໂຍດ ບໍ່ເປັນອາລົມຂອງຄັນຖະ ບໍ່ເປັນອາລົມຂອງໂອຄະ ບໍ່ເປັນອາລົມຂອງໂຍຄະ ບໍ່ເປັນອາລົມຂອງນິວອນ ບໍ່ເປັນອາລົມຂອງປະຣາມາດ ບໍ່ເປັນອາລົມຂອງອຸປາທານ ບໍ່ເປັນອາລົມຂອງສັງກິເລດແມ່ນບໍ?

ປຣ. ແມ່ນ

ສກ. ສັງໂຍດຜາຣົບຮູບເກີດຂຶ້ນ ຮູບບໍ່ເປັນອາລົມຂອງສັງໂຍດ ບໍ່ເປັນອາລົມ ຂອງຄັນຖະ ຯລຯ ບໍ່ເປັນອາລົມຂອງສັງກິເລດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຣາຄະຜາຣົບອຳມະຕະເກີດຂຶ້ນ ອຳມະຕະບໍ່ເປັນບ່ອນຕັ້ງແຫ່ງຣາຄະ ບໍ່ເປັນເຫດແຫ່ງຄວາມກຳໜັດ ບໍ່ເປັນເຫດແຫ່ງຄວາມຕ້ອງການ ບໍ່ເປັນເຫດແຫ່ງຄວາມມົວເມົາ ບໍ່ເປັນເຫດແຫ່ງຄວາມຜູກພັນ ບໍ່ເປັນເຫດແຫ່ງຄວາມຫຼົງໃຫຼແມ່ນບໍ?

ປຣ. ແມ່ນ

ສກ. ຣາຄະຜາຣົບຮູບເກີດຂຶ້ນ ຮູບບໍ່ເປັນບ່ອນຕັ້ງແຫ່ງຣາຄະ ຯລຯ ບໍ່ເປັນເຫດແຫ່ງຄວາມຫຼົງໃຫຼແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂທສະຜາຣົບອຳມະຕະເກີດຂຶ້ນ ອຳມະຕະບໍ່ເປັນບ່ອນຕັ້ງແຫ່ງໂທສະ ບໍ່ເປັນບ່ອນຕັ້ງແຫ່ງຄວາມໂກດ ບໍ່ເປັນບ່ອນຕັ້ງແຫ່ງຄວາມກະທົບແມ່ນບໍ?

ປຣ. ແມ່ນ

ສກ. ໂທສະຜາຣົບຮູບເກີດຂຶ້ນ ຮູບບໍ່ເປັນບ່ອນຕັ້ງແຫ່ງໂທສະ ບໍ່ເປັນບ່ອນຕັ້ງແຫ່ງຄວາມໂກດ ບໍ່ເປັນບ່ອນຕັ້ງແຫ່ງຄວາມກະທົບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂມຫະຜາຣົບອຳມະຕະເກີດຂຶ້ນ ອຳມະຕະບໍ່ເປັນບ່ອນຕັ້ງແຫ່ງໂມຫະ ບໍ່ແມ່ນເຮັດຄວາມບໍ່ຮູ້ ຯລຯ ເປັນໄປເພື່ອຄວາມດັບກິເລດແມ່ນບໍ?

ປຣ. ແມ່ນ

ສກ. ໂມຫະຜາຣົບຮູບເກີດຂຶ້ນ ຮູບບໍ່ເປັນບ່ອນຕັ້ງແຫ່ງໂມຫະ ບໍ່ແມ່ນເຮັດຄວາມບໍ່ຮູ້ ຯລຯ ເປັນໄປເພື່ອຄວາມດັບກິເລດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໕໕໑] ປຣ. ທ່ານບໍ່ຍອມຮັບວ່າ "ສັງໂຍດມີອຳມະຕະເປັນອາລົມ" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ປຸຖຸຊົນໝາຍຮູ້ນິບພານໂດຍຄວາມເປັນນິບພານ ເມື່ອໝາຍຮູ້ນິບພານໂດຍຄວາມເປັນນິບພານແລ້ວ ຈຶ່ງກຳນົດໝາຍນິບພານກຳນົດໝາຍໃນນິບພານ ກຳນົດໝາຍໂດຍຄວາມເປັນນິບພານ ກຳນົດໝາຍນິບພານວ່າເປັນຂອງເຮົາ ຍິນດີນິບພານ" ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ສັງໂຍດຈຶ່ງມີອຳມະຕະເປັນອາລົມໄດ້

**ອະມະຕາຣຳມະນະກະຖາ ຈົບ**

## ໖. ຣູປັງສາຣຳມະນັນຕິກະຖາ (໗໖)

## ວ່າດ້ວຍຮູບທີ່ຮັບຮູ້ອາລົມໄດ້

[໔໔໘] ສກ. ຮູບເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຮູບນັ້ນມີຄວາມນຶກເຖິງ ຄວາມຜູກໃຈ ຄວາມສົນໃຈ ຄວາມໃຝ່ໃຈ ຄວາມຈົງໃຈ ຄວາມປາຖະໜາ ຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບນັ້ນບໍ່ມີຄວາມນຶກເຖິງ ບໍ່ມີຄວາມຜູກໃຈ ຯລຯ ບໍ່ມີຄວາມຕັ້ງໃຈບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຮູບນັ້ນບໍ່ມີຄວາມນຶກເຖິງ ບໍ່ມີຄວາມຜູກໃຈ ຯລຯ ບໍ່ມີຄວາມຕັ້ງໃຈ ທ່ານກໍບໍ່ຄວນຍອມຮັບວ່າ "ຮູບເປັນສະພາວະທຳທີ່ຮັບຮູ້ອາລົມໄດ້"

ສກ. ຜັດສະເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ມີຄວາມຜູກໃຈ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ຮູບເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ມີຄວາມຜູກໃຈ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເວທະນາ ຯລຯ ສັນຍາ ຯລຯ ເຈຕະນາ ຯລຯ ຈິດ ຯລຯ ສັດທາ ຯລຯ ວິຣິຍະ ຯລຯ ສະຕິ ຯລຯ ສະມາທິ ຯລຯ ປັນຍາ ຯລຯ ຣາຄະ ຯລຯ ໂທສະ ຯລຯ ໂມຫະ ຯລຯ ມານະ ຯລຯ ທິດຖິ ຯລຯ ວິຈິກິດສາ ຯລຯ ຖີນະ ຯລຯ ອຸດທັດຈະ ຯລຯ ອະຫິຣິກະ ຯລຯ

ອະໂນດຕັບປະ ເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ມີຄວາມຜູກໃຈ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ຮູບເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ມີຄວາມຜູກໃຈ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ ບໍ່ມີຄວາມນຶກເຖິງ ບໍ່ມີຄວາມຜູກໃຈ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ຜັດສະເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ ບໍ່ມີຄວາມນຶກເຖິງ ບໍ່ມີຄວາມຜູກໃຈ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ ບໍ່ມີຄວາມນຶກເຖິງ ບໍ່ມີຄວາມຜູກໃຈ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ເວທະນາ ຯລຯ ອະໂນດຕັບປະ ເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ ບໍ່ມີຄວາມນຶກເຖິງ ບໍ່ມີຄວາມຜູກໃຈ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໕໕໓] ປຣ. ທ່ານບໍ່ຍອມຮັບວ່າ "ຮູບເປັນສະພາວະທຳທີ່ຮັບຮູ້ອາລົມໄດ້" ແມ່ນບໍ?

ສກ. ແມ່ນ

ປຣ. ຮູບມີປັດໄຈບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກຮູບມີປັດໄຈ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ຮູບເປັນສະພາວະທຳທີ່ຮັບຮູ້ອາລົມໄດ້"

**ຮູປັງສາຣໍາມະນັນຕິກະຖາ ຈົບ**

## ໔. ອະນຸສະຍາສະນາຣໍາມະນະກະຖາ (໗໗)

## ວ່າດ້ວຍອະນຸໄສຮັບຮູ້ອາລົມບໍ່ໄດ້

[໕໕໔] ສກ. ອະນຸໄສເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ອະນຸໄສເປັນຮູບ ເປັນນິບພານ ເປັນຈັກຂາຍະຕະນະ ຯລຯ ເປັນໂຜດຖັບພາຍະຕະນະ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກາມຣາຄານຸໄສເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ກາມຣາຄະ ກາມຣາຄະປະຣິຍຸດຖານ ກາມຣາຄະສັງໂຍດ ກາໂມຄະ ກາມໂຍຄະ ກາມສັນທະນິວອນ ເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກາມຣາຄະ ກາມຣາຄະປະຣິຍຸດຖານ ກາມຣາຄະສັງໂຍດ ກາໂມຄະ ກາມໂຍຄະ ກາມສັນທະນິວອນ ເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ກາມຣາຄານຸໄສເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກາມຣາຄານຸໄສເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ນັບເນື່ອງໃນຂັນໃດ?

ປຣ. ນັບເນື່ອງໃນສັງຂານຂັນ

ສກ. ສັງຂານຂັນເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສັງຂານຂັນເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ເວທະນາຂັນ ສັນຍາຂັນ ວິນຍານຂັນ ເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກາມຣາຄານຸໄສນັບເນື່ອງໃນສັງຂານຂັນ ເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ກາມຣາຄະນັບເນື່ອງໃນສັງຂານຂັນ ເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກາມຣາຄະນັບເນື່ອງໃນສັງຂານຂັນ ເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ ແມ່ນບໍ?

ປຣ. ແມ່ນ

ສກ. ກາມຣາຄານຸໄສນັບເນື່ອງໃນສັງຂານຂັນ ເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການຣາຄານຸໄສນັບເນື່ອງໃນສັງຂານຂັນ ເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ ແຕ່ການຣາຄະນັບເນື່ອງໃນສັງຂານຂັນ ເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ສັງຂານຂັນສ່ວນໜຶ່ງເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ ອີກສ່ວນໜຶ່ງເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສັງຂານຂັນສ່ວນໜຶ່ງເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ ອີກສ່ວນໜຶ່ງເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ເວທະນາຂັນ ສັນຍາຂັນ ວິນຍານຂັນ ສ່ວນໜຶ່ງເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ ອີກສ່ວນໜຶ່ງເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໕໕໕] ສກ. ປະຕິຄານຸໄສ ມານານຸໄສ ທິດຖານຸໄສ ວິຈິກິດສານຸໄສ ພະວະຣາຄານຸໄສ ອະວິດຊານຸໄສ ເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ອະວິດຊາ ອະວິດໂຊຄະ ອະວິດຊາໂຍຄະ ອະວິດຊານຸໄສ ອະວິດຊາປະຣິຍຸດຖານ ອະວິດຊາສັງໂຍດ ອະວິດຊານິວອນ ເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະວິດຊາ ອະວິດໂຊຄະ ອະວິດຊາໂຍຄະ ຯລຯ ອະວິດຊານິວອນ ເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ອະວິດຊານຸໄສເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະວິດຊານຸໄສເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ນັບເນື່ອງໃນຂັນໃດ?

ປຣ. ນັບເນື່ອງໃນສັງຂານຂັນ

ສກ. ສັງຂານຂັນເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສັງຂານຂັນເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ເວທະນາຂັນ ສັນຍາຂັນ ວິນຍານຂັນ ເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແບວນັ້ນ ฯລฯ

ສກ. ອະວິດຊານຸໄສນັບເນື່ອງໃນສັງຂານຂັນ ເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ອະວິດຊານັບເນື່ອງໃນສັງຂານຂັນ ເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ ແມ່ນບໍ?

ປຣ. ບໍ່ຄວນກ່າວແບວນັ້ນ ฯລฯ

ສກ. ອະວິດຊານັບເນື່ອງໃນສັງຂານຂັນ ເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ອະວິດຊານຸໄສນັບເນື່ອງໃນສັງຂານຂັນ ເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແບວນັ້ນ ฯລฯ

ສກ. ອະວິດຊານຸໄສນັບເນື່ອງໃນສັງຂານຂັນ ເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ ແຕ່ ອະວິດຊານັບເນື່ອງໃນສັງຂານຂັນ ເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ສັງຂານຂັນສ່ວນໜຶ່ງເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ ອີກສ່ວນໜຶ່ງເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແບວນັ້ນ ฯລฯ

ສກ. ສັງຂານຂັນສ່ວນໜຶ່ງເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ ອີກສ່ວນໜຶ່ງເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ເວທະນາຂັນ ສັນຍາຂັນ ວິນຍານຂັນ ສ່ວນໜຶ່ງເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ ອີກສ່ວນໜຶ່ງເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແບວນັ້ນ ฯລฯ

[໔໕໖] ປຣ. ທ່ານບໍ່ຍອມຮັບວ່າ "ອະນຸໄສເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້" ແມ່ນບໍ?

ສກ. ແມ່ນ

ປຣ. ປຸຖຸຊົນ ເມື່ອຈິດທີ່ເປັນກຸສົນ ແລະທີ່ເປັນອັບພະຍາກະຕະກຳລັງເປັນໄປຢູ່ ທ່ານຍອມຮັບວ່າ "ເປັນຜູ້ມີອະນຸໄສ" ແມ່ນບໍ?

ສກ. ແມ່ນ

ປຣ. ອະນຸໄສເຫຼົ່ານັ້ນເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ແມ່ນບໍ?

ສກ. ບໍ່ຄວນກ່າວແບວນັ້ນ ฯລฯ

ປຣ. ດັ່ງນັ້ນ ອະນຸໄສຈຶ່ງເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້

ປຣ. ປຸຖຸຊົນ ເມື່ອຈິດທີ່ເປັນກຸສົນ ແລະທີ່ເປັນອັບພະຍາກະຕະກຳລັງເປັນໄປຢູ່ ທ່ານຍອມຮັບວ່າ "ເປັນຜູ້ມີຣາຄະ" ແມ່ນບໍ?

ສກ. ແມ່ນ

ປຣ. ຣາຄະນັ້ນເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ฯລฯ

ປຣ. ດັ່ງນັ້ນ ຣາຄະຈຶ່ງເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້

**ອະນຸສະຍາສະນາຣຳມະນະກະຖາ ຈົບ**

# ໕. ຍານັງອະນາຣຳມະນັນຕິກະຖາ (໗໗)

## ວ່າດ້ວຍຍານທີ່ຮັບຮູ້ອາລົມບໍ່ໄດ້

[໕໕໗] ສກ. ຍານເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຍານເປັນຮູບ ເປັນນິບພານ ເປັນຈັກຂາຍະຕະນະ ฯລฯ ເປັນໂຜດຖັບພາຍະຕະນະ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຍານເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ປັນຍາ ປັນຍິນຊີ ປັນຍາພະລະ ສຳມາທິດຖິ ທຳມະວິຈະຍະສຳໂພດຊົງ ເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ປັນຍາ ປັນຍິນຊີ ປັນຍາພະລະ ສຳມາທິດຖິ ທຳມະວິຈະຍະສຳໂພດຊົງ ເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຍານເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຍານເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ນັບເນື່ອງໃນຂັນໃດ?

ປຣ. ນັບເນື່ອງໃນສັງຂານຂັນ

ສກ. ສັງຂານຂັນເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສັງຂານຂັນເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ເວທະນາຂັນ ສັນຍາຂັນ ວິນຍານຂັນ ເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຍານນັບເນື່ອງໃນສັງຂານຂັນ ເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ປັນຍານັບເນື່ອງໃນສັງຂານຂັນ ເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ປັນຍານັບເນື່ອງໃນສັງຂານຂັນ ເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຍານນັບເນື່ອງໃນສັງຂານຂັນ ເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຍານນັບເນື່ອງໃນສັງຂານຂັນ ເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ ແຕ່ປັນຍານັບເນື່ອງໃນສັງຂານຂັນ ເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ສັງຂານຂັນສ່ວນໜຶ່ງເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ ອີກສ່ວນໜຶ່ງເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສັງຂານຂັນສ່ວນໜຶ່ງເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ ອີກສ່ວນໜຶ່ງເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ເວທະນາຂັນ ສັນຍາຂັນ ວິນຍານຂັນ ສ່ວນໜຶ່ງເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ ອີກສ່ວນໜຶ່ງເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໕໕໗] ປຣ. ທ່ານບໍ່ຍອມຮັບວ່າ "ຍານເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະອະຣະຫັນຜູ້ພຽບພ້ອມດ້ວຍຈັກຂຸວິນຍານ ທ່ານຍອມຮັບວ່າ "ເປັນຜູ້ມີຍານ" ແມ່ນບໍ?

ສກ. ແມ່ນ

ປຣ. ຍານນັ້ນເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ດັ່ງນັ້ນ ຍານຈຶ່ງເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້

ປຣ. ພຣະອະຣະຫັນຜູ້ພຽບພ້ອມດ້ວຍຈັກຂຸວິນຍານ ທ່ານຍອມຮັບວ່າ "ເປັນຜູ້ມີປັນຍາ" ແມ່ນບໍ?

ສກ. ແມ່ນ

ປຣ. ປັນຍານັ້ນເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ດັ່ງນັ້ນ ປັນຍາຈຶ່ງເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້

**ຍານັງອະນາຣຳມະນັນຕິກະຖາ ຈົບ**

# ໖. (ກ) ອະຕີຕາຣຳມະນະກະຖາ (໗໙)

# ວ່າດ້ວຍຈິດມີອະດີດທຳເປັນອາລົມ

[໔໕໙] ສກ. ຈິດທີ່ມີອະດີດທຳເປັນອາລົມ ເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ ແມ່ນບໍ?

ປຣ. ແມ່ນ

ສກ. ຈິດມີອະດີດທຳເປັນອາລົມບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຈິດມີອະດີດທຳເປັນອາລົມໄດ້ ທ່ານກໍບໍ່ຄວນຍອມຮັບວ່າ "ຈິດທີ່ມີອະດີດທຳເປັນອາລົມ ເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້" ຄຳຂອງທ່ານທີ່ວ່າ "ຈິດທີ່ມີອະດີດທຳເປັນອາລົມ ເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້" ຈຶ່ງຜິດກໍຫຼືວ່າຫາກ ຈິດເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ ທ່ານກໍບໍ່ຄວນຍອມຮັບວ່າ "ຈິດມີອະດີດທຳເປັນອາລົມ" ຄຳຂອງທ່ານທີ່ວ່າ "ຈິດທີ່ຮັບຮູ້ອາລົມບໍ່ໄດ້ ແຕ່ມີອະດີດທຳເປັນອາລົມ" ຈຶ່ງຜິດ

ສກ. ຈິດທີ່ມີອະດີດທຳເປັນອາລົມ ເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມນຶກເຖິງ ຯລຯ ຄວາມຕັ້ງໃຈ ຜາຣົບອະດີດ ມີຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຄວາມນຶກເຖິງ ຯລຯ ຄວາມຕັ້ງໃຈ ຜາຣົບອະດີດມີຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ຈິດທີ່ມີອະດີດທຳເປັນອາລົມ ເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້"

**ອະຕີຕາຣຳມະນະກະຖາ ຈົບ**

# ៦. (໒) ອະນາຄະຕາຣໍາມະນະກະຖາ

## ວ່າດ້ວຍຈິດມີອະນາຄົດທໍາເປັນອາລົມ

[໔៦໐] ສກ. ຈິດທີ່ມີອະນາຄົດທໍາເປັນອາລົມ ເປັນສະພາວະທໍາທີ່ຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຈິດມີອະນາຄົດທໍາເປັນອາລົມໄດ້ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຈິດມີອະນາຄົດທໍາເປັນອາລົມໄດ້ ທ່ານກໍບໍ່ຄວນຍອມຮັບວ່າ "ຈິດທີ່ມີອະນາຄົດທໍາເປັນອາລົມ ເປັນສະພາວະທໍາທີ່ຮັບຮູ້ອາລົມບໍ່ໄດ້" ຄໍາຂອງທ່ານທີ່ວ່າ "ຈິດທີ່ມີອະນາຄົດທໍາເປັນອາລົມ ເປັນສະພາວະທໍາທີ່ຮັບຮູ້ອາລົມບໍ່ໄດ້" ຈຶ່ງຜິດ

ກໍຫຼືວ່າຫາກຈິດເປັນສະພາວະທໍາທີ່ຮັບຮູ້ອາລົມບໍ່ໄດ້ ທ່ານກໍບໍ່ຄວນຍອມຮັບວ່າ "ຈິດມີອະນາຄົດທໍາເປັນອາລົມ" ຄໍາຂອງທ່ານທີ່ວ່າ "ຈິດທີ່ຮັບຮູ້ອາລົມບໍ່ໄດ້ມີອະນາຄົດທໍາເປັນອາລົມ" ຈຶ່ງຜິດ

ສກ. ຈິດທີ່ມີອະນາຄົດທໍາເປັນອາລົມ ເປັນສະພາວະທໍາທີ່ຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມນຶກເຖິງ ຯລຯ ຄວາມຕັ້ງໃຈພາຣົບອະນາຄົດມີຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຄວາມນຶກເຖິງ ຯລຯ ຄວາມຕັ້ງໃຈ ພາຣົບອະນາຄົດມີຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ຈິດທີ່ມີອະນາຄົດທໍາເປັນອາລົມ ເປັນສະພາວະທໍາທີ່ຮັບຮູ້ອາລົມບໍ່ໄດ້"

ສກ. ຄວາມນຶກເຖິງ ຯລຯ ຄວາມຕັ້ງໃຈ ພາຣົບປັດຈຸບັນມີຢູ່ ຈິດທີ່ມີປັດຈຸບັນທໍາເປັນອາລົມ ເປັນສະພາວະທໍາທີ່ຮັບຮູ້ອາລົມໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມນຶກເຖິງ ຯລຯ ຄວາມຕັ້ງໃຈ ພາຣົບອະດີດມີຢູ່ ຈິດທີ່ມີອະດີດທໍາເປັນອາລົມ ເປັນສະພາວະທໍາທີ່ຮັບຮູ້ອາລົມໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມນຶກເຖິງ ຯລຯ ຄວາມຕັ້ງໃຈ ພາຣົບປັດຈຸບັນມີຢູ່ ຈິດທີ່ມີປັດຈຸບັນທໍາເປັນອາລົມ ເປັນສະພາວະທໍາທີ່ຮັບຮູ້ອາລົມໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມນຶກເຖິງ ຯລຯ ຄວາມຕັ້ງໃຈ ພາຣົບອະນາຄົດມີຢູ່ ຈິດທີ່ມີອະນາຄົດທໍາເປັນອາລົມ ເປັນສະພາວະທໍາທີ່ຮັບຮູ້ອາລົມໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມນຶກເຖິງ ຯລຯ ຄວາມຕັ້ງໃຈ ຜາຣົບອະດີດມີຢູ່ ຈິດທີ່ມີອະດີດທຳເປັນອາລົມ ເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມນຶກເຖິງ ຯລຯ ຄວາມຕັ້ງໃຈ ຜາຣົບປັດຈຸບັນມີຢູ່ ຈິດທີ່ມີປັດຈຸບັນທຳເປັນອາລົມ ເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມນຶກເຖິງ ຯລຯ ຄວາມຕັ້ງໃຈ ຜາຣົບອະນາຄົດມີຢູ່ ຈິດທີ່ມີອະນາຄົດທຳເປັນອາລົມ ເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມນຶກເຖິງ ຯລຯ ຄວາມຕັ້ງໃຈ ຜາຣົບປັດຈຸບັນມີຢູ່ ຈິດທີ່ມີປັດຈຸບັນທຳເປັນອາລົມ ເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໕໗໑] ປຣ. ທ່ານບໍ່ຍອມຮັບວ່າ "ຈິດທີ່ມີອະດີດທຳ ແລະອະນາຄົດທຳເປັນອາລົມ ເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້" ແມ່ນບໍ?

ສກ. ແມ່ນ

ປຣ. ອາລົມທີ່ເປັນອະດີດ ແລະອະນາຄົດບໍ່ມີບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກອາລົມທີ່ເປັນອະດີດທຳແລະອະນາຄົດທຳບໍ່ມີ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ຈິດທີ່ມີອະດີດທຳແລະອະນາຄົດທຳເປັນອາລົມ ເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້" ຯລຯ

**ອະນາຄະຕາຣຳມະນະກະຖາ ຈົບ**

# ໗. ວິຕັກການຸປະຕິຕະກະຖາ (໗໐)

## ວ່າດ້ວຍຈິດເນື່ອງດ້ວຍວິຕົກ

[໕໗໔] ສກ. ຈິດທຸກດວງເນື່ອງດ້ວຍວິຕົກແມ່ນບໍ?

ປຣ. ແມ່ນ

ສກ. ຈິດທຸກດວງເນື່ອງດ້ວຍວິຈານ ເນື່ອງດ້ວຍປີຕິ ເນື່ອງດ້ວຍສຸກ ເນື່ອງດ້ວຍທຸກ ເນື່ອງດ້ວຍໂສມະນັດ ເນື່ອງດ້ວຍໂທມະນັດ ເນື່ອງດ້ວຍອຸເປກຂາ ເນື່ອງດ້ວຍສັດທາ ເນື່ອງດ້ວຍວິຣິຍະ ເນື່ອງດ້ວຍສະຕິ ເນື່ອງດ້ວຍສະມາທິ ເນື່ອງດ້ວຍປັນຍາ ເນື່ອງດ້ວຍຣາຄະ ເນື່ອງດ້ວຍໂທສະ ຯລຯ ເນື່ອງດ້ວຍອະໂນດຕັບປະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈິດທຸກດວງເນື່ອງດ້ວຍວິຕົກແມ່ນບໍ?

ປຣ. ແມ່ນ

ສກ. ສະມາທິທີ່ບໍ່ມີວິຕົກມີພຽງວິຈານມີຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກສະມາທິທີ່ບໍ່ມີວິຕົກມີພຽງວິຈານມີຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ຈິດທຸກດວງເນື່ອງດ້ວຍວິຕົກ"

ສກ. ຈິດທຸກດວງເນື່ອງດ້ວຍວິຕົກແມ່ນບໍ?

ປຣ. ແມ່ນ

ສກ. ສະມາທິທີ່ບໍ່ມີວິຕົກ ບໍ່ມີວິຈານ ມີຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກສະມາທິທີ່ບໍ່ມີວິຕົກ ບໍ່ມີວິຈານມີຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ຈິດທຸກດວງເນື່ອງດ້ວຍວິຕົກ"

ສກ. ຈິດທຸກດວງເນື່ອງດ້ວຍວິຕົກແມ່ນບໍ?

ປຣ. ແມ່ນ

ສກ. ສະມາທິພຣະຜູ້ມີພຣະພາກເຈົ້າຕັດໄວ້ ໓ ຢ່າງ ຄື (໑) ສະມາທິທີ່ມີວິຕົກມີວິຈານ (໒) ສະມາທິທີ່ບໍ່ມີວິຕົກມີພຽງວິຈານ (໓) ສະມາທິທີ່ບໍ່ມີວິຕົກບໍ່ມີວິຈານ ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກສະມາທິພຣະຜູ້ມີພຣະພາກເຈົ້າຕັດໄວ້ ໓ ຢ່າງ ຄື (໑) ສະມາທິທີ່ມີວິຕົກມີວິຈານ (໒) ສະມາທິທີ່ບໍ່ມີວິຕົກມີພຽງວິຈານ (໓) ສະມາທິທີ່ບໍ່ມີວິຕົກບໍ່ມີວິຈານ ທ່ານກໍບໍ່ຄວນຍອມຮັບວ່າ "ຈິດທຸກດວງເນື່ອງດ້ວຍວິຕົກ"

**ວິຕັກກາສຸປະຕິຕະກະຖາ ຈົບ**

## ໗. ວິຕັກກະວິບຜາຣະສັດທະກະຖາ (໙໑)

## ວ່າດ້ວຍຄວາມແຜ່ໄປແຫ່ງວິຕົກເປັນສຽງ

[໔໘໓] ສກ. ທຸກຄັ້ງເມື່ອນຶກຢູ່ ຕອງຢູ່ ຄວາມແຜ່ໄປແຫ່ງວິຕົກເປັນສຽງແມ່ນບໍ?

ປຣ. ແມ່ນ

ສກ. ທຸກຄັ້ງເມື່ອຖືກຕ້ອງຢູ່ ຄວາມແຜ່ໄປແຫ່ງຜັດສະເປັນສຽງ ຯລຯ ທຸກຄັ້ງເມື່ອສະເຫວີຍອາລົມ ຄວາມແຜ່ໄປແຫ່ງເວທະນາເປັນສຽງ ຯລຯ ທຸກຄັ້ງເມື່ອຈຳໄດ້ ຄວາມແຜ່ໄປແຫ່ງສັນຍາເປັນສຽງ ຯລຯ ທຸກຄັ້ງເມື່ອຈົງໃຈຢູ່ ຄວາມແຜ່ໄປແຫ່ງເຈຕະນາເປັນສຽງ ຯລຯ

ທຸກຄັ້ງເມື່ອຄິດຢູ່ ຄວາມແຜ່ໄປແຫ່ງຈິດເປັນສຽງ ຯລຯ ທຸກຄັ້ງເມື່ອຣະລຶກຢູ່ ຄວາມແຜ່ໄປແຫ່ງສະຕິເປັນສຽງ ຯລຯ ທຸກຄັ້ງເມື່ອຮູ້ຢູ່ ຄວາມແຜ່ໄປແຫ່ງປັນຍາເປັນສຽງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ທຸກຄັ້ງ ເມື່ອນຶກຢູ່ ຕອງຢູ່ ຄວາມແຜ່ໄປແຫ່ງວິຕົກເປັນສຽງແມ່ນບໍ?

ປຣ. ແມ່ນ

ສກ. ຄວາມແຜ່ໄປແຫ່ງວິຕົກ ເປັນສຽງທີ່ເພິ່ງຮູ້ດ້ວຍໂສຕະວິນຍານ ກະທົບທີ່ໂສຕະມາສູ່ຄອງແຫ່ງໂສຕະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມແຜ່ໄປແຫ່ງວິຕົກບໍ່ເປັນສຽງທີ່ເພິ່ງຮູ້ດ້ວຍໂສຕະວິນຍານ ບໍ່ກະທົບທີ່ໂສຕະບໍ່ມາສູ່ຄອງແຫ່ງໂສຕະບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຄວາມແຜ່ໄປແຫ່ງວິຕົກບໍ່ເປັນສຽງທີ່ເພິ່ງຮູ້ດ້ວຍໂສຕະວິນຍານ ບໍ່ກະທົບທີ່ໂສຕະ ບໍ່ມາສູ່ຄອງແຫ່ງໂສຕະ ທ່ານກໍບໍ່ຄວນຍອມຮັບວ່າ "ທຸກຄັ້ງເມື່ອນຶກຢູ່ ຕອງຢູ່ ຄວາມແຜ່ໄປແຫ່ງວິຕົກເປັນສຽງ"

**ວິຕັກກະວິບຜາຣະສັດທະກະຖາ ຈົບ**

## ໗. ນະຍະຖາຈິດຕັດສະວາຈາຕິກະຖາ (໗໔)
## ວ່າດ້ວຍວາຈາບໍ່ເປັນໄປຕາມທີ່ຄິດ

[໕໗໔] ສກ. ວາຈາບໍ່ເປັນໄປຕາມທີ່ຄິດແມ່ນບໍ?

ປຣ. ແມ່ນ

ສກ. ວາຈາມີໄດ້ແກ່ບຸກຄົນຜູ້ບໍ່ມີຜັດສະ ບໍ່ມີເວທະນາ ບໍ່ມີສັນຍາ ບໍ່ມີເຈຕະນາ ບໍ່ມີຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວາຈາມີໄດ້ແກ່ບຸກຄົນຜູ້ມີຜັດສະ ມີເວທະນາ ມີສັນຍາ ມີເຈຕະນາ ມີຈິດບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກວາຈາມີໄດ້ແກ່ບຸກຄົນຜູ້ມີຜັດສະ ຯລຯ ມີຈິດ ທ່ານກໍບໍ່ຄວນຍອມຮັບວ່າ "ວາຈາບໍ່ເປັນໄປຕາມທີ່ຄິດ"

ສກ. ວາຈາບໍ່ເປັນໄປຕາມທີ່ຄິດແມ່ນບໍ?

ປຣ. ແມ່ນ

ສກ. ວາຈາມີໄດ້ແກ່ບຸກຄົນຜູ້ບໍ່ນຶກເຖິງຢູ່ ຯລຯ ບໍ່ຜູກໃຈຢູ່ ຯລຯ ບໍ່ຕັ້ງໃຈຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວາຈາມີໄດ້ແກ່ບຸກຄົນຜູ້ນຶກເຖິງຢູ່ ຜູກໃຈຢູ່ ຯລຯ ຕັ້ງໃຈຢູ່ ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກວາຈາມີໄດ້ແກ່ບຸກຄົນຜູ້ນຶກເຖິງຢູ່ ຜູກໃຈຢູ່ ຯລຯ ຕັ້ງໃຈຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ວາຈາບໍ່ເປັນໄປຕາມທີ່ຄິດ"

ສກ. ວາຈາບໍ່ເປັນໄປຕາມທີ່ຄິດແມ່ນບໍ?

ປຣ. ແມ່ນ

ສກ. ວາຈາມີຈິດເປັນສະມຸດຖານ ເກີດຮ່ວມກັບຈິດ ເກີດຂະນະດຽວກັບຈິດບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກວາຈາມີຈິດເປັນສະມຸດຖານ ເກີດຮ່ວມກັບຈິດ ເກີດຂະນະດຽວກັບຈິດ ທ່ານກໍບໍ່ຄວນຍອມຮັບວ່າ "ວາຈາບໍ່ເປັນໄປຕາມທີ່ຄິດ"

ສກ. ວາຈາບໍ່ເປັນໄປຕາມທີ່ຄິດແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນບໍ່ປະສົງຈະກ່າວກໍກ່າວໄດ້ ບໍ່ປະສົງຈະວ່າກໍວ່າໄດ້ ບໍ່ປະສົງ ຈະຮ້ອງຮຽກກໍຮ້ອງຮຽກໄດ້ ບໍ່ປະສົງຈະເວົ້າກໍເວົ້າໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນປະສົງຈະກ່າວຈຶ່ງກ່າວໄດ້ ປະສົງຈະວ່າຈຶ່ງວ່າໄດ້ ປະສົງຈະຮ້ອງຈຶ່ງຮ້ອງໄດ້ ປະສົງຈະເວົ້າຈຶ່ງເວົ້າໄດ້ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນປະສົງຈະກ່າວຈຶ່ງກ່າວໄດ້ ປະສົງຈະວ່າຈຶ່ງວ່າໄດ້ ປະສົງຈະຮ້ອງຮຽກຈຶ່ງຮ້ອງຮຽກໄດ້ ປະສົງຈະເວົ້າຈຶ່ງເວົ້າໄດ້ ທ່ານກໍບໍ່ຄວນຍອມຮັບວ່າ "ວາຈາບໍ່ເປັນໄປຕາມທີ່ຄິດ"

[໔໗໕] ປຣ. ທ່ານບໍ່ຍອມຮັບວ່າ "ວາຈາບໍ່ເປັນໄປຕາມທີ່ຄິດ" ແມ່ນບໍ?

ສກ. ແມ່ນ

ປຣ. ບາງຄົນຄິດວ່າ "ຈະກ່າວແນວໜຶ່ງ" ແຕ່ກ່າວໄປອີກແນວໜຶ່ງ ຄິດວ່າ "ຈະວ່າແນວໜຶ່ງ" ແຕ່ວ່າໄປອີກແນວໜຶ່ງ ຄິດວ່າ "ຈະຮ້ອງຮຽກແນວໜຶ່ງ" ແຕ່ຮ້ອງຮຽກໄປອີກແນວໜຶ່ງ ຄິດວ່າ "ຈະເວົ້າແນວໜຶ່ງ" ແຕ່ເວົ້າໄປອີກແນວໜຶ່ງ ມີຢູ່ບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກບາງຄົນຄິດວ່າ "ຈະກ່າວແນວໜຶ່ງ" ແຕ່ກ່າວໄປອີກແນວໜຶ່ງ ຯລຯ ຄິດວ່າ "ຈະເວົ້າແນວໜຶ່ງ" ແຕ່ເວົ້າໄປອີກແນວໜຶ່ງມີຢູ່ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ວາຈາບໍ່ເປັນໄປຕາມທີ່ຄິດ"

**ນະຍະຖາຈິດຕັດສະວາຈາຕິກະຖາ ຈົບ**

# ໑໐. ນະຍະຖາຈິດຕັດສະກາຍະກຳມັນຕິກະຖາ (໙໓)

## ວ່າດ້ວຍກາຍຍະກຳບໍ່ເປັນໄປຕາມທີ່ຄິດ

[໔໙໙] ສກ. ກາຍຍະກຳບໍ່ເປັນໄປຕາມທີ່ຄິດແມ່ນບໍ?

ປຣ. ແມ່ນ

ສກ. ກາຍຍະກຳມີໄດ້ແກ່ບຸກຄົນຜູ້ບໍ່ມີຜັດສະ ຯລຯ ບໍ່ມີຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກາຍຍະກຳມີໄດ້ແກ່ບຸກຄົນຜູ້ມີຜັດສະ ຯລຯ ມີຈິດບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກກາຍຍະກຳມີໄດ້ແກ່ບຸກຄົນຜູ້ມີຜັດສະ ຯລຯ ມີຈິດ ທ່ານກໍບໍ່ຄວນຍອມຮັບວ່າ "ກາຍຍະກຳບໍ່ເປັນໄປຕາມທີ່ຄິດ"

ສກ. ກາຍຍະກຳບໍ່ເປັນໄປຕາມທີ່ຄິດແມ່ນບໍ?

ປຣ. ແມ່ນ

ສກ. ກາຍຍະກຳມີໄດ້ແກ່ບຸກຄົນຜູ້ບໍ່ນຶກເຖິງຢູ່ ຯລຯ ບໍ່ຕັ້ງໃຈຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກາຍຍະກຳມີໄດ້ແກ່ບຸກຄົນຜູ້ນຶກເຖິງຢູ່ ຯລຯ ຕັ້ງໃຈຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກກາຍຍະກຳມີໄດ້ແກ່ບຸກຄົນຜູ້ນຶກເຖິງຢູ່ ຯລຯ ຕັ້ງໃຈຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ກາຍຍະກຳບໍ່ເປັນໄປຕາມທີ່ຄິດ"

ສກ. ກາຍຍະກຳບໍ່ເປັນໄປຕາມທີ່ຄິດແມ່ນບໍ?

ປຣ. ແມ່ນ

ສກ. ກາຍຍະກຳມີຈິດເປັນສະມຸດຖານ ເກີດຮ່ວມກັບຈິດ ເກີດຂະນະດຽວກັບຈິດບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກກາຍຍະກຳມີຈິດເປັນສະມຸດຖານ ເກີດຮ່ວມກັບຈິດ ເກີດຂະນະດຽວກັບຈິດ ທ່ານກໍບໍ່ຄວນຍອມຮັບວ່າ "ກາຍຍະກຳບໍ່ເປັນໄປຕາມທີ່ຄິດ"

ສກ. ກາຍຍະກຳບໍ່ເປັນໄປຕາມທີ່ຄິດແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນບໍ່ປະສົງຈະກ້າວໄປກໍກ້າວໄປໄດ້ ບໍ່ປະສົງຈະຖອຍກັບກໍຖອຍກັບໄດ້ ບໍ່ປະສົງຈະແລເບິ່ງກໍແລເບິ່ງໄດ້ ບໍ່ປະສົງຈະຫຼຽວເບິ່ງກໍຫຼຽວເບິ່ງໄດ້ ບໍ່ປະສົງຈະຄູ້ເຂົ້າກໍຄູ້ເຂົ້າໄດ້ ບໍ່ປະສົງຈະຢຽດອອກກໍຢຽດອອກໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນປະສົງຈະກ້າວໄປຈຶ່ງກ້າວໄປໄດ້ ປະສົງຈະຖອຍກັບຈຶ່ງຖອຍກັບໄດ້ ປະສົງຈະແລເບິ່ງຈຶ່ງແລເບິ່ງໄດ້ ປະສົງຈະຫຼຽວເບິ່ງຈຶ່ງຫຼຽວເບິ່ງໄດ້ ປະສົງຈະຄູ້ເຂົ້າຈຶ່ງຄູ້ເຂົ້າໄດ້ ປະສົງຈະຢຽດອອກຈຶ່ງຢຽດອອກໄດ້ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນປະສົງຈະກ້າວໄປຈຶ່ງກ້າວໄປໄດ້ ຯລຯ ປະສົງຈະຢຽດອອກ ຈຶ່ງຢຽດອອກໄດ້ ທ່ານກໍບໍ່ຄວນຍອມຮັບວ່າ "ກາຍຍະກຳບໍ່ເປັນໄປຕາມທີ່ຄິດ"

[໕໗໗] ປຣ. ທ່ານບໍ່ຍອມຮັບວ່າ "ກາຍຍະກຳບໍ່ເປັນໄປຕາມທີ່ຄິດ" ແມ່ນບໍ?

ສກ. ແມ່ນ

ປຣ. ບາງຄົນຄິດວ່າ "ຈະໄປໃນທີ່ແຫ່ງໜຶ່ງ" ແຕ່ໄປໃນທີ່ອີກແຫ່ງໜຶ່ງ ຯລຯ ຄິດວ່າ "ຈະຢຽດແຂນຂ້າງໜຶ່ງ" ແຕ່ຢຽດແຂນອີກຂ້າງໜຶ່ງ ມີຢູ່ບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກບາງຄົນຄິດວ່າ "ຈະໄປໃນທີ່ແຫ່ງໜຶ່ງ" ແຕ່ໄປໃນທີ່ອີກແຫ່ງໜຶ່ງ ຯລຯ ຄິດວ່າ "ຈະຢຽດແຂນຂ້າງໜຶ່ງ" ແຕ່ຢຽດແຂນອີກຂ້າງໜຶ່ງມີຢູ່ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ກາຍຍະກຳບໍ່ເປັນໄປຕາມທີ່ຄິດ"

**ນະຍະຖາຈິດຕັດສະກາຍະກຳມັນຕິກະຖາ ຈົບ**

# ໑໑. ອະຕີຕານາກະຕະປັດຈຸບັນນະກະຖາ (໗໔)

## ວ່າດ້ວຍອະດີດ ອະນາຄົດ ແລະປັດຈຸບັນ

[໕໗໘] ສກ. ບຸກຄົນປະກອບດ້ວຍອະດີດແມ່ນບໍ?

ປຣ. ແມ່ນ

ສກ. ອະດີດດັບໄປແລ້ວ ຫາຍໄປແລ້ວ ແປຜັນໄປແລ້ວ ສູນໄປແລ້ວ ດັບສູນໄປແລ້ວບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກອະດີດດັບໄປແລ້ວ ຫາຍໄປແລ້ວ ແປຜັນໄປແລ້ວ ສູນໄປແລ້ວ ດັບສູນໄປແລ້ວ ທ່ານກໍບໍ່ຄວນຍອມຮັບວ່າ "ບຸກຄົນປະກອບດ້ວຍອະດີດ"

ສກ. ບຸກຄົນປະກອບດ້ວຍອະນາຄົດແມ່ນບໍ?

ປຣ. ແມ່ນ

ສກ. ອະນາຄົດຍັງບໍ່ເກີດ ຍັງບໍ່ມີ ຍັງບໍ່ເກີດພ້ອມ ຍັງບໍ່ບັງເກີດ ຍັງບໍ່ບັງເກີດຂຶ້ນ ຍັງບໍ່ຜາກົດບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກອະນາຄົດຍັງບໍ່ເກີດ ຍັງບໍ່ມີ ຍັງບໍ່ເກີດພ້ອມ ຍັງບໍ່ບັງເກີດ ຍັງບໍ່ບັງເກີດຂຶ້ນ ຍັງບໍ່ຜາກົດ ທ່ານກໍບໍ່ຄວນຍອມຮັບວ່າ "ບຸກຄົນປະກອບດ້ວຍອະນາຄົດ"

[໕໗໙] ສກ. ບຸກຄົນປະກອບດ້ວຍຮູບຂັນທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນ ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນປະກອບດ້ວຍຮູບຂັນ ໓ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນປະກອບດ້ວຍຂັນ ໕ ທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນປະກອບດ້ວຍຂັນ ໑໕ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນປະກອບດ້ວຍຈັກຂາຍະຕະນະທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນ ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນປະກອບດ້ວຍຈັກຂາຍະຕະນະ ໓ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນປະກອບດ້ວຍອາຍະຕະນະ ໑໒ ທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນປະກອບດ້ວຍອາຍະຕະນະ ໓໖ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນປະກອບດ້ວຍຈັກຂຸທາດທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນ ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນປະກອບດ້ວຍຈັກຂຸທາດ ໓ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນປະກອບດ້ວຍທາດ ໑໘ ທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນ ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນປະກອບດ້ວຍທາດ ໕໔ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນປະກອບດ້ວຍຈັກຂຸນຊີທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນປະກອບດ້ວຍຈັກຂຸນຊີ ໓ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນປະກອບດ້ວຍອິນຊີ ໒໒ ທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນປະກອບດ້ວຍອິນຊີ ໖໖ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໕໗໐] ປຣ. ທ່ານບໍ່ຍອມຮັບວ່າ "ບຸກຄົນປະກອບດ້ວຍອະດີດ ແລະອະນາຄົດ" ແມ່ນບໍ?

ສກ. ແມ່ນ

ປຣ. ບຸກຄົນຜູ້ເພ່ງວິໂມກ ໘ ໄດ້ຊານ ໔ ຕາມປາຖະໜາ ໄດ້ອະນຸປຸບພະວິຫາຣະສະມາບັດ ໙ ມີຢູ່ບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກບຸກຄົນຜູ້ເພ່ງວິໂມກ ໘ ໄດ້ຊານ ໔ ຕາມປາຖະໜາ ໄດ້ອະນຸປຸບພະວິຫາຣະສະມາບັດ ໙ ມີຢູ່ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ບຸກຄົນປະກອບດ້ວຍອະດີດ ແລະອະນາຄົດ"

**ອະຕີຕານາກະຕະປັດຈຸບປັນນະກະຖາ ຈົບ**

**ນະວະມະວັກ ຈົບ**

## ລວມກະຖາທີ່ມີໃນວັກນີ້ ຄື

໑. ອານິສັງສະທັດສາວີກະຖາ
໒. ຮູປັງສາຣຳມະນັນຕີກະຖາ
໕. ຍານັງອະນາຣຳມະນັນຕີກະຖາ
໖. (ກ) ອະຕີຕາຣຳມະນະກະຖາ
໗. ວິຕັກການຸປະຕິຕະກະຖາ
໙. ນະຍະຖາຈິດຕັດສະວາຈາຕີກະຖາ
໑໐. ນະຍະຖາຈິດຕັດສະກາຍະກຳມັນຕີກະຖາ
໑໑. ອະຕີຕານາກະຕະປັດຈຸບປັນນະກະຖາ
໘. ອະມະຕາຣຳມະນະກະຖາ
໔. ອະນຸສະຍາສະນາຣຳມະນະກະຖາ
໖. (ຂ) ອະນາຄະຕາຣຳມະນະກະຖາ
໘. ວິຕັກກະວິບຜາຣະສັດທະກະຖາ

# ໑໐. ທະສະມະວັກ

## ໑. ນິໂຣທະກະຖາ (໙໕)

## ວ່າດ້ວຍນິໂຣດ

[໕໗໑] ສກ. ເມື່ອຂັນ ໕ ທີ່ສະແຫວງຫາປະຕິສົນທິຍັງບໍ່ດັບ ຂັນ ໕ ທີ່ເປັນກິຣິຍາ ກໍອຸບັດແມ່ນບໍ?

ປຣ. ແມ່ນ

ສກ. ມີການປະຊຸມແຫ່ງຂັນ ໑໐ ຂັນ ໑໐ ມາລວມກັນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ມີການປະຊຸມແຫ່ງຂັນ ໑໐ ຂັນ ໑໐ ມາລວມກັນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ມີການປະຊຸມແຫ່ງຜັດສະ ໒ ຢ່າງ ຯລຯ ຈິດ ໒ ດວງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອຂັນ ໕ ທີ່ສະແຫວງຫາປະຕິສົນທິຍັງບໍ່ດັບ ຂັນ ໔ ທີ່ເປັນກິຣິຍາກໍອຸບັດແມ່ນບໍ?

ປຣ. ແມ່ນ

ສກ. ມີການປະຊຸມແຫ່ງຂັນ ໙ ຂັນ ໙ ມາລວມກັນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ມີການປະຊຸມແຫ່ງຂັນ ໙ ຂັນ ໙ ມາລວມກັນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ມີການປະຊຸມແຫ່ງຜັດສະ ໒ ຢ່າງ ຯລຯ ຈິດ ໒ ດວງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອຂັນ ໕ ທີ່ສະແຫວງຫາປະຕິສົນທິຍັງບໍ່ດັບ ຍານທີ່ເປັນກິຣິຍາກໍອຸບັດ ແມ່ນບໍ?

ປຣ. ແມ່ນ

ສກ. ມີການປະຊຸມແຫ່ງຂັນ ໖ ຂັນ ໖ ມາລວມກັນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ມີການປະຊຸມແຫ່ງຂັນ ໖ ຂັນ ໖ ມາລວມກັນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ມີການປະຊຸມແຫ່ງຜັດສະ ໒ ຢ່າງ ຯລຯ ຈິດ ໒ ດວງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໕໗໒] ປຣ. ເມື່ອຂັນ ໕ ທີ່ສະແຫວງຫາປະຕິສົນທິດັບ ມັກກໍອຸບັດແມ່ນບໍ?

ສກ. ແມ່ນ

ປຣ. ບຸກຄົນຕາຍແລ້ວ ຈະເລີນມັກໄດ້ ບຸກຄົນທຳກາລະແລ້ວຈະເລີນມັກໄດ້ແມ່ນບໍ?

ສກ. ບໍ່ຄວນກ່າວແບວນັ້ນ ຯລຯ

**ນິໂຣທະກະຖາ ຈົບ**

# ໘. ຮູປັງມັກໂຄຕິກະຖາ (໙໖)

## ວ່າດ້ວຍຮູບເປັນມັກ

[໔໗໖] ສກ. ຮູບຂອງບຸກຄົນຜູ້ມີຄວາມພຽບພ້ອມດ້ວຍມັກ ເປັນມັກແມ່ນບໍ?

ປຣ. ແມ່ນ

ສກ. ຮູບເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຄວາມຜູກໃຈ ຄວາມສົນໃຈ ຄວາມໃຝ່ໃຈ ຄວາມຈົງໃຈ ຄວາມປາຖະໜາ ຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແບວນັ້ນ ຯລຯ

ສກ. ຮູບເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຮູບເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈ ທ່ານກໍບໍ່ຄວນຍອມຮັບວ່າ "ຮູບຂອງບຸກຄົນຜູ້ມີຄວາມພຽບພ້ອມດ້ວຍມັກເປັນມັກ"

ສກ. ສຳມາວາຈາເປັນມັກແມ່ນບໍ?

ປຣ. ແມ່ນ

ສກ. ສຳມາວາຈາເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແບວນັ້ນ ຯລຯ

ສກ. ສຳມາວາຈາເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກສຳມາວາຈາເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈ ທ່ານກໍບໍ່ຄວນຍອມຮັບວ່າ "ສຳມາວາຈາເປັນມັກ"

ສກ. ສຳມາກຳມັນຕະ ຯລຯ ສຳມາອາຊີວະເປັນມັກແມ່ນບໍ?

ປຣ. ແມ່ນ

ສກ. ສຳມາອາຊີວະເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສຳມາອາຊີວະເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກສຳມາອາຊີວະເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈ ທ່ານກໍບໍ່ຄວນຍອມຮັບວ່າ "ສຳມາອາຊີວະເປັນມັກ"

[໔໗໔] ສກ. ສຳມາທິດຖິເປັນມັກ ແລະສຳມາທິດຖິນັ້ນເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ສຳມາວາຈາເປັນມັກ ແລະສຳມາວາຈານັ້ນເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສຳມາທິດຖິເປັນມັກ ແລະສຳມາທິດຖິນັ້ນເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ສຳມາກຳມັນຕະ ຯລຯ ສຳມາອາຊີວະເປັນມັກ ແລະສຳມາອາຊີວະນັ້ນເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສຳມາສັງກັບປະ ຯລຯ ສຳມາວາຍາມະ ຯລຯ ສຳມາສະຕິ ຯລຯ ສຳມາສະມາທິເປັນມັກ ແລະສຳມາສະມາທິນັ້ນເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ສຳມາວາຈາເປັນມັກ ແລະສຳມາວາຈານັ້ນເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສຳມາສະມາທິເປັນມັກ ແລະສຳມາສະມາທິນັ້ນເປັນສະພາວະທຳທີ່ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ສຳມາກຳມັນຕະ ຯລຯ ສຳມາອາຊີວະເປັນມັກ ແລະສຳມາອາຊີວະນັ້ນເປັນ

ສະພາວະທຳທີ່ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຫລື ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຫລື

ສກ. ສຳມາວາຈາເປັນມັກ ແລະສຳມາວາຈານັ້ນເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຫລື ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ສຳມາທິດຖິເປັນມັກ ແລະສຳມາທິດຖິນັ້ນເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຫລື ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຫລື

ສກ. ສຳມາວາຈາເປັນມັກ ແລະສຳມາວາຈານັ້ນເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຫລື ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ສຳມາສັງກັບປະ ຫລື ສຳມາວາຍາມະ ຫລື ສຳມາສະຕິ ຫລື ສຳມາສະມາທິເປັນມັກ ແລະສຳມາສະມາທິນັ້ນເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຫລື ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຫລື

ສກ. ສຳມາກຳມັນຕະ ຫລື ສຳມາອາຊີວະເປັນມັກ ແລະສຳມາອາຊີວະນັ້ນເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຫລື ບໍ່ມີຄວາມຕັ້ງໃຈ ແມ່ນບໍ?

ປຣ. ແມ່ນ

ສກ. ສຳມາທິດຖິ ຫລື ສຳມາສັງກັບປະ ຫລື ສຳມາວາຍາມະ ຫລື ສຳມາສະຕິ ຫລື ສຳມາສະມາທິເປັນມັກ ແລະສຳມາສະມາທິນັ້ນເປັນສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຫລື ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຫລື

[໔໗໔] ປຣ. ທ່ານບໍ່ຍອມຮັບວ່າ "ຮູບຂອງບຸກຄົນຜູ້ມີຄວາມພຽບພ້ອມດ້ວຍມັກເປັນມັກ" ແມ່ນບໍ?

ສກ. ແມ່ນ

ປຣ. ສຳມາວາຈາ ສຳມາກຳມັນຕະ ສຳມາອາຊີວະ ເປັນມັກບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກສຳມາວາຈາ ສຳມາກຳມັນຕະ ສຳມາອາຊີວະເປັນມັກ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ຮູບຂອງບຸກຄົນຜູ້ມີຄວາມພຽບພ້ອມດ້ວຍມັກເປັນມັກ"

**ຮູປັງມັກໂຄຕິກະຖາ ຈົບ**

## ៦. ປັນຈະວິນຍານະສະມັງຄິດສະມັກຄະພາວະນາກະຖາ (ໝາ)

## ວ່າດ້ວຍການຈະເລີນມັກຂອງຜູ້ພຽບພ້ອມດ້ວຍວິນຍານ ໕

[໔໗໖] ສກ. ບຸກຄົນຜູ້ພຽບພ້ອມດ້ວຍວິນຍານ ໕ ມີການຈະເລີນມັກແມ່ນບໍ?

ປຣ. ແມ່ນ

ສກ. ວິນຍານ ໕ ມີທຳທີ່ເກີດຂຶ້ນເປັນວັດຖຸ ມີທຳທີ່ເກີດຂຶ້ນເປັນອາລົມ ແມ່ນບໍ?

ປຣ. ແມ່ນ

ສກ. ຫາກວິນຍານ ໕ ມີທຳທີ່ເກີດຂຶ້ນເປັນວັດຖຸ ມີທຳທີ່ເກີດຂຶ້ນເປັນອາລົມ ທ່ານກໍບໍ່ຄວນຍອມຮັບວ່າ "ບຸກຄົນຜູ້ພຽບພ້ອມດ້ວຍວິນຍານ ໕ ມີການຈະເລີນມັກໄດ້"

ສກ. ວິນຍານ ໕ ມີທຳທີ່ເກີດຂຶ້ນກ່ອນເປັນວັດຖຸ ມີທຳທີ່ເກີດຂຶ້ນກ່ອນເປັນອາລົມ ມີທຳພາຍໃນຕົນເປັນວັດຖຸ ມີທຳພາຍນອກຕົນເປັນອາລົມ ມີທຳບໍ່ແຕກດັບເປັນວັດຖຸ ມີທຳບໍ່ແຕກດັບເປັນອາລົມ ມີວັດຖຸຕ່າງກັນ ມີອາລົມຕ່າງກັນ ບໍ່ສະເຫວີຍອາລົມຂອງກັນແລະກັນ ບໍ່ເກີດຂຶ້ນຍ້ອນບໍ່ໃສ່ໃຈ ບໍ່ເກີດຂຶ້ນຍ້ອນບໍ່ມະນະສິການ ເກີດຂຶ້ນໂດຍບໍ່ສັບລຳດັບກັນ ບໍ່ເກີດຂຶ້ນພ້ອມກັນ ບໍ່ເກີດຂຶ້ນໃນລຳດັບຂອງກັນແລະກັນ ວິນຍານ ໕ ບໍ່ມີຄວາມຜູກໃຈບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກວິນຍານ ໕ ບໍ່ມີຄວາມຜູກໃຈ ທ່ານກໍບໍ່ຄວນຍອມຮັບວ່າ "ບຸກຄົນຜູ້ພຽບພ້ອມດ້ວຍວິນຍານ ໕ ມີການຈະເລີນມັກໄດ້"

[໔໗໗] ສກ. ບຸກຄົນຜູ້ພຽບພ້ອມດ້ວຍຈັກຂຸວິນຍານມີການຈະເລີນມັກແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂຸວິນຍານຜາຣົບຄວາມວ່າງເກີດຂຶ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈັກຂຸວິນຍານຜາຣົບຄວາມວ່າງເກີດຂຶ້ນແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນອາໄສຈັກຂຸແລະຄວາມວ່າງ ຈັກຂຸວິນຍານຈຶ່ງເກີດຂຶ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຍ້ອນອາໄສຈັກຂຸແລະຄວາມວ່າງ ຈັກຂຸວິນຍານຈຶ່ງເກີດຂຶ້ນແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ວ່າ "ຍ້ອນອາໄສຈັກຂຸແລະຄວາມວ່າງ ຈັກຂຸວິນຍານຈຶ່ງເກີດຂຶ້ນ" ມີຢູ່ຈິງບໍ?

ປຣ. ບໍ່ມີ

ສກ. ພຣະສູດທີ່ວ່າ “ຍ້ອນອາໄສຈັກຂຸແລະຮູບ ຈັກຂຸວິນຍານຈຶ່ງເກີດຂຶ້ນ” ມີຢູ່ຈິງແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະສູດວ່າ “ຍ້ອນອາໄສຈັກຂຸແລະຮູບ ຈັກຂຸວິນຍານຈຶ່ງເກີດຂຶ້ນ” ມີຢູ່ຈິງ ທ່ານກໍບໍ່ຄວນຍອມຮັບວ່າ “ຍ້ອນອາໄສຈັກຂຸແລະຄວາມວ່າງ ຈັກຂຸວິນຍານຈຶ່ງເກີດຂຶ້ນ”

[໕໗໙] ສກ. ບຸກຄົນຜູ້ພຽບພ້ອມດ້ວຍຈັກຂຸວິນຍານ ມີການຈະເລີນມັກແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂຸວິນຍານຜາຣົບອະດີດແລະອະນາຄົດເກີດຂຶ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ພຽບພ້ອມດ້ວຍຈັກຂຸວິນຍານມີການຈະເລີນມັກແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂຸວິນຍານຜາຣົບຜັດສະ ຯລຯ ຜາຣົບເວທະນາ ຯລຯ ຜາຣົບສັນຍາ ຯລຯ ຜາຣົບເຈຕະນາ ຯລຯ ຜາຣົບຈິດ ຯລຯ ຜາຣົບຈັກຂຸ ຯລຯ ຜາຣົບກາຍ ຯລຯ ຜາຣົບສຽງ ຯລຯ ຜາຣົບໂຜດຖັບພະເກີດຂຶ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ພຽບພ້ອມດ້ວຍມະໂນວິນຍານ ມີການຈະເລີນມັກ ມະໂນວິນຍານຜາຣົບຄວາມວ່າງເກີດຂຶ້ນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ພຽບພ້ອມດ້ວຍຈັກຂຸວິນຍານ ມີການຈະເລີນມັກ ຈັກຂຸວິນຍານ ຜາຣົບຄວາມວ່າງເກີດຂຶ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ພຽບພ້ອມດ້ວຍມະໂນວິນຍານ ມີການຈະເລີນມັກ ມະໂນວິນຍານ ຜາຣົບອະດີດ ແລະອະນາຄົດເກີດຂຶ້ນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ພຽບພ້ອມດ້ວຍຈັກຂຸວິນຍານມີການຈະເລີນມັກ ຈັກຂຸວິນຍານຜາຣົບອະດີດແລະອະນາຄົດເກີດຂຶ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ພຽບພ້ອມດ້ວຍມະໂນວິນຍານມີການຈະເລີນມັກ ມະໂນວິນຍານຜາຣົບຜັດສະ ຯລຯ ຜາຣົບເວທະນາ ຯລຯ ຜາຣົບໂຜດຖັບພະເກີດຂຶ້ນ ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ພຽບພ້ອມດ້ວຍຈັກຂຸວິນຍານມີການຈະເລີນມັກ ຈັກຂຸວິນຍານ ຜາຣົບຜັດສະ ຜາຣົບເວທະນາ ຯລຯ ຜາຣົບໂຜດຖັບພະເກີດຂຶ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໗໙] ປຣ. ທ່ານບໍ່ຍອມຮັບວ່າ "ບຸກຄົນຜູ້ພຽບພ້ອມດ້ວຍວິນຍານ ໕ ມີການຈະເລີນມັກ" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ພິກຂຸໃນທຳວິໄນນີ້ເຫັນຮູບທາງຕາແລ້ວເປັນຜູ້ບໍ່ລວມຖື ບໍ່ແຍກຖື ຯລຯ ຟັງສຽງທາງຫູແລ້ວ ຯລຯ ດົມກິ່ນທາງດັງ ຯລຯ ຊີມຣົດທາງລີ້ນ ຯລຯ ຖືກຕ້ອງໂຜດຖັບພະທາງກາຍແລ້ວເປັນຜູ້ບໍ່ລວມຖື ບໍ່ແຍກຖື" ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ບຸກຄົນຜູ້ພຽບພ້ອມດ້ວຍວິນຍານ ໕ ຈຶ່ງມີການຈະເລີນມັກໄດ້

**ປັນຈະວິນຍານະສະມັງຄິດສະມັກຄະພາວະນາກະຖາ ຈົບ**

## ໔. ປັນຈະວິນຍານາກຸສະລາປິອະກຸສະລາປີຕິກະຖາ (໙໘)

## ວ່າດ້ວຍວິນຍານ ໕ ເປັນກຸສົນກໍມີ ເປັນອະກຸສົນກໍມີ

[໔໘໐] ສກ. ວິນຍານ ໕ ເປັນກຸສົນກໍມີ ເປັນອະກຸສົນກໍມີແມ່ນບໍ?

ປຣ. ແມ່ນ

ສກ. ວິນຍານ ໕ ມີທຳທີ່ເກີດຂຶ້ນເປັນວັດຖຸ ມີທຳທີ່ເກີດຂຶ້ນເປັນອາລົມ ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກວິນຍານ ໕ ມີທຳທີ່ເກີດຂຶ້ນເປັນວັດຖຸ ມີທຳທີ່ເກີດຂຶ້ນເປັນອາລົມ ທ່ານກໍບໍ່ຄວນຍອມຮັບວ່າ "ວິນຍານ ໕ ເປັນກຸສົນກໍມີ ເປັນອະກຸສົນກໍມີ"

ສກ. ວິນຍານ ໕ ມີທຳທີ່ເກີດຂຶ້ນກ່ອນເປັນວັດຖຸ ມີທຳທີ່ເກີດຂຶ້ນກ່ອນເປັນອາລົມມີທຳພາຍໃນຕົນເປັນວັດຖຸ ມີທຳພາຍນອກຕົນເປັນອາລົມ ມີທຳບໍ່ແຕກດັບເປັນວັດຖຸ ມີທຳບໍ່ແຕກດັບເປັນອາລົມ ມີວັດຖຸຕ່າງກັນ ມີອາລົມຕ່າງກັນ ບໍ່ສະເຫວີຍອາລົມຂອງກັນແລະກັນ ບໍ່ເກີດຂຶ້ນຍ້ອນບໍ່ໃສ່ໃຈ ບໍ່ເກີດຂຶ້ນຍ້ອນບໍ່ມະນະສິການ ເກີດຂຶ້ນໂດຍບໍ່ສັບລຳດັບກັນ ບໍ່ເກີດຂຶ້ນພ້ອມກັນບໍ່ເກີດຂຶ້ນໃນລຳດັບຂອງກັນແລະກັນ ວິນຍານ ໕ ບໍ່ມີຄວາມຜູກໃຈບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກວິນຍານ ໕ ບໍ່ມີຄວາມຜູກໃຈ ທ່ານກໍບໍ່ຄວນຍອມຮັບວ່າ "ວິນຍານ ໕ ເປັນກຸສົນກໍມີ ເປັນອະກຸສົນກໍມີ"

[໔໗໑] ສກ. ຈັກຂຸວິນຍານເປັນກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂຸວິນຍານຜາຣົບຄວາມວ່າງເກີດຂຶ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈັກຂຸວິນຍານຜາຣົບຄວາມວ່າງເກີດຂຶ້ນແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນອາໄສຈັກຂຸແລະຄວາມວ່າງ ຈັກຂຸວິນຍານຈຶ່ງເກີດຂຶ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຍ້ອນອາໄສຈັກຂຸແລະຄວາມວ່າງ ຈັກຂຸວິນຍານຈຶ່ງເກີດຂຶ້ນແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ວ່າ "ຍ້ອນອາໄສຈັກຂຸແລະຄວາມວ່າງຈັກຂຸວິນຍານຈຶ່ງເກີດຂຶ້ນ" ມີຢູ່ຈິງບໍ?

ປຣ. ບໍ່ມີ

ສກ. ພຣະສູດທີ່ວ່າ "ຍ້ອນອາໄສຈັກຂຸແລະຮູບ ຈັກຂຸວິນຍານຈຶ່ງເກີດຂຶ້ນ" ມີຢູ່ຈິງແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະສູດທີ່ວ່າ "ຍ້ອນອາໄສຈັກຂຸແລະຮູບ ຈັກຂຸວິນຍານຈຶ່ງເກີດຂຶ້ນ" ມີຢູ່ຈິງ ທ່ານກໍບໍ່ຄວນຍອມຮັບວ່າ "ຍ້ອນອາໄສຈັກຂຸແລະຄວາມວ່າງ ຈັກຂຸວິນຍານຈຶ່ງເກີດຂຶ້ນ"

[໔໗໔] ສກ. ຈັກຂຸວິນຍານເປັນກຸສົນກໍມີ ເປັນອະກຸສົນກໍມີແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂຸວິນຍານຜາຣົບອະດີດ ແລະອະນາຄົດເກີດຂຶ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈັກຂຸວິນຍານເປັນກຸສົນກໍມີ ເປັນອະກຸສົນກໍມີແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂຸວິນຍານຜາຣົບຜັດສະ ຯລຯ ຜາຣົບຈິດ ຯລຯ ຜາຣົບຈັກຂຸ ຯລຯ ຜາຣົບກາຍ ຯລຯ ຜາຣົບສຽງ ຯລຯ ຜາຣົບໂຜດຖັບພະເກີດຂຶ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ມະໂນວິນຍານເປັນກຸສົນກໍມີ ເປັນອະກຸສົນກໍມີ ມະໂນວິນຍານຜາຣົບຄວາມວ່າງເກີດຂຶ້ນແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂຸວິນຍານເປັນກຸສົນກໍມີ ເປັນອະກຸສົນກໍມີ ຈັກຂຸວິນຍານຜາຣົບຄວາມວ່າງເກີດຂຶ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ມະໂນວິນຍານເປັນກຸສົນກໍມີ ເປັນອະກຸສົນກໍມີ ມະໂນວິນຍານຜາຣົບອະດີດແລະອະນາຄົດເກີດຂຶ້ນແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂຸວິນຍານເປັນກຸສົນກໍມີ ເປັນອະກຸສົນກໍມີ ຈັກຂຸວິນຍານຜາຣົບອະດີດແລະອະນາຄົດເກີດຂຶ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ฯລฯ

ສກ. ມະໂນວິນຍານເປັນກຸສົນກໍມີ ເປັນອະກຸສົນກໍມີ ມະໂນວິນຍານຜາຣົບຜັດສະ ฯລฯ ຜາຣົບຈິດ ฯລฯ ຜາຣົບຈັກຂຸ ฯລฯ ຜາຣົບກາຍ ฯລฯ ຜາຣົບສຽງ ฯລฯ ຜາຣົບໂຜດຖັບພະເກີດຂຶ້ນແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂຸວິນຍານເປັນກຸສົນກໍມີ ເປັນອະກຸສົນກໍມີ ຈັກຂຸວິນຍານຜາຣົບຜັດສະ ฯລฯ ຜາຣົບໂຜດຖັບພະເກີດຂຶ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ฯລฯ

[໔໗໓] ປຣ. ທ່ານບໍ່ຍອມຮັບວ່າ "ວິນຍານ ໕ ເປັນກຸສົນກໍມີເປັນອະກຸສົນກໍມີ"ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ພິກຂຸໃນທຳວິໄນນີ້ເຫັນຮູບທາງຕາແລ້ວເປັນຜູ້ລວມຖື ฯລฯ ບໍ່ເປັນຜູ້ລວມຖື ฯລฯ ຟັງສຽງທາງຫູ ฯລฯ ຖືກຕ້ອງໂຜດຖັບພະທາງກາຍແລ້ວເປັນຜູ້ລວມຖື ฯລฯ ບໍ່ເປັນຜູ້ລວມຖື" ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ວິນຍານ ໕ ຈຶ່ງເປັນກຸສົນກໍມີ ເປັນອະກຸສົນກໍມີ

**ປັນຈະວິນຍານາກຸສະລາປິອະກຸສະລາປີຕິກະຖາ ຈົບ**

## ໕. ສາໂພຄາຕິກະຖາ (໘໙)
## ວ່າດ້ວຍວິນຍານ ໕ ມີຄວາມຜູກໃຈ

[໔໗໔] ສກ. ວິນຍານ ໕ ມີຄວາມຜູກໃຈແມ່ນບໍ?

ປຣ. ແມ່ນ

ສກ. ວິນຍານ ໕ ມີທຳທີ່ເກີດຂຶ້ນເປັນວັດຖຸ ມີທຳທີ່ເກີດຂຶ້ນເປັນອາລົມບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກວິນຍານ ໕ ມີທຳທີ່ເກີດຂຶ້ນເປັນວັດຖຸ ມີທຳທີ່ເກີດຂຶ້ນເປັນອາລົມ ທ່ານກໍບໍ່ຄວນຍອມຮັບວ່າ "ວິນຍານ ໕ ມີຄວາມຜູກໃຈ"

ສກ. ວິນຍານ ໕ ມີທຳທີ່ເກີດຂຶ້ນກ່ອນເປັນວັດຖຸ ມີທຳທີ່ເກີດຂຶ້ນກ່ອນເປັນອາລົມ ມີທຳພາຍໃນຕົນເປັນວັດຖຸ ມີທຳພາຍນອກຕົນເປັນອາລົມ ມີທຳບໍ່ແຕກດັບເປັນວັດຖຸ ມີທຳບໍ່ແຕກດັບເປັນອາລົມ ມີວັດຖຸຕ່າງກັນ ມີອາລົມຕ່າງກັນ ບໍ່ສະເຫວີຍອາລົມຂອງກັນແລະກັນ ບໍ່ເກີດຂຶ້ນຍ້ອນບໍ່ໃສ່ໃຈ ບໍ່ເກີດຂຶ້ນຍ້ອນບໍ່ມະນະສິການ ເກີດຂຶ້ນໂດຍບໍ່ສັບລຳດັບກັນ ບໍ່ເກີດຂຶ້ນພ້ອມກັນ ບໍ່ເກີດຂຶ້ນໃນລຳດັບຂອງກັນແລະກັນ ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກວິນຍານ ໕ ບໍ່ເກີດຂຶ້ນໃນລຳດັບຂອງກັນແລະກັນ ທ່ານກໍບໍ່ຄວນຍອມຮັບວ່າ "ວິນຍານ ໕ ມີຄວາມຜູກໃຈ"

[໔໗໕] ສກ. ຈັກຂຸວິນຍານມີຄວາມຜູກໃຈແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂຸວິນຍານຜາຣົບຄວາມວ່າງເກີດຂຶ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈັກຂຸວິນຍານຜາຣົບຄວາມວ່າງເກີດຂຶ້ນແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນອາໄສຈັກຂຸແລະຄວາມວ່າງ ຈັກຂຸວິນຍານຈຶ່ງເກີດຂຶ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຍ້ອນອາໄສຈັກຂຸແລະຄວາມວ່າງ ຈັກຂຸວິນຍານຈຶ່ງເກີດຂຶ້ນແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ວ່າ "ຍ້ອນອາໄສຈັກຂຸແລະຄວາມວ່າງ ຈັກຂຸວິນຍານຈຶ່ງເກີດຂຶ້ນ" ມີຢູ່ຈິງບໍ?

ປຣ. ບໍ່ມີ ຯລຯ

ສກ. ພຣະສູດທີ່ວ່າ "ຍ້ອນອາໄສຈັກຂຸແລະຮູບຈັກຂຸວິນຍານຈຶ່ງເກີດຂຶ້ນ" ມີຢູ່ຈິງ ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະສູດທີ່ວ່າ "ຍ້ອນອາໄສຈັກຂຸແລະຮູບ ຈັກຂຸວິນຍານຈຶ່ງເກີດຂຶ້ນ" ມີຢູ່ຈິງ ທ່ານກໍບໍ່ຄວນຍອມຮັບວ່າ "ຍ້ອນອາໄສຈັກຂຸແລະຄວາມວ່າງ ຈັກຂຸວິນຍານຈຶ່ງເກີດຂຶ້ນ"

ສກ. ຈັກຂຸວິນຍານມີຄວາມຜູກໃຈແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂຸວິນຍານຜາຣົບອະດີດແລະອະນາຄົດເກີດຂຶ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈັກຂຸວິນຍານມີຄວາມຜູກໃຈແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂຸວິນຍານຜາຣົບຜັດສະ ຯລຯ ຜາຣົບໂຜດຖັບພະເກີດຂຶ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ມະໂນວິນຍານມີຄວາມຜູກໃຈ ມະໂນວິນຍານຜາຣົບຄວາມວ່າງເກີດຂຶ້ນແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂຸວິນຍານມີຄວາມຜູກໃຈ ຈັກຂຸວິນຍານຜາຣົບຄວາມວ່າງເກີດຂຶ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ມະໂນວິນຍານມີຄວາມຜູກໃຈ ມະໂນວິນຍານຜາຣົບອະດີດ ແລະອະນາຄົດເກີດຂຶ້ນແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂຸວິນຍານມີຄວາມຜູກໃຈ ຈັກຂຸວິນຍານຜາຣົບອະດີດ ແລະອະນາຄົດເກີດຂຶ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ມະໂນວິນຍານມີຄວາມຜູກໃຈ ມະໂນວິນຍານຜາຣົບຜັດສະ ຯລຯ ຜາຣົບໂຜດຖັບພະເກີດຂຶ້ນແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂຸວິນຍານມີຄວາມຜູກໃຈ ຈັກຂຸວິນຍານຜາຣົບຜັດສະ ຯລຯ ຜາຣົບໂຜດຖັບພະເກີດຂຶ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໗໖] ປຣ. ທ່ານບໍ່ຍອມຮັບວ່າ "ວິນຍານ ໕ ມີຄວາມຜູກໃຈ" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ພິກຂຸໃນທຳວິໄນນີ້ເຫັນຮູບທາງຕາແລ້ວເປັນຜູ້ລວມຖື ຯລຯ ບໍ່ເປັນຜູ້ລວມຖື ຯລຯ ຖືກຕ້ອງໂຜດຖັບພະທາງກາຍແລ້ວເປັນຜູ້ລວມຖື ຯລຯ ບໍ່ເປັນຜູ້ລວມຖື" ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ວິນຍານ ໕ ຈຶ່ງມີຄວາມຜູກໃຈ ຯລຯ

**ສາໂພຄາຕິກະຖາ ຈົບ**

# ໖. ທະວິທິສີເລທິກະຖາ (໑໐໐)

## ວ່າດ້ວຍສີນ ໘ ຢ່າງ

[໔໘໗] ສກ. ບຸກຄົນຜູ້ພຽບພ້ອມດ້ວຍມັກ ເປັນຜູ້ບໍລິບູນດ້ວຍສີນ ໘ ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ພຽບພ້ອມດ້ວຍມັກ ເປັນຜູ້ບໍລິບູນດ້ວຍຜັດສະ ໘ ເວທະນາ ໘ ສັນຍາ ໘ ເຈຕະນາ ໘ ຈິດ ໘ ສັດທາ ໘ ສະຕິ ໘ ສະມາທິ ໘ ປັນຍາ ໘ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ບຸກຄົນຜູ້ພຽບພ້ອມດ້ວຍມັກ ເປັນຜູ້ບໍລິບູນດ້ວຍໂລກິຍະສີນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ພຽບພ້ອມດ້ວຍມັກ ເປັນຜູ້ບໍລິບູນດ້ວຍຜັດສະທີ່ເປັນໂລກິຍະ ເວທະນາທີ່ເປັນໂລກິຍະ ສັນຍາທີ່ເປັນໂລກິຍະ ເຈຕະນາທີ່ເປັນໂລກິຍະ ຈິດທີ່ເປັນໂລກິຍະ ສັດທາທີ່ເປັນໂລກິຍະ ວິຣິຍະທີ່ເປັນໂລກິຍະ ສະຕິທີ່ເປັນໂລກິຍະ ສະມາທິທີ່ເປັນໂລກິຍະ ປັນຍາທີ່ເປັນໂລກິຍະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ບຸກຄົນຜູ້ພຽບພ້ອມດ້ວຍມັກ ເປັນຜູ້ບໍລິບູນດ້ວຍສີນທີ່ເປັນໂລກິຍະ ແລະໂລກຸດຕະຣະແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ພຽບພ້ອມດ້ວຍມັກ ເປັນຜູ້ບໍລິບູນດ້ວຍຜັດສະທີ່ເປັນໂລກິຍະ ແລະໂລກຸດຕະຣະ ฯລฯ ເປັນຜູ້ບໍລິບູນດ້ວຍປັນຍາທີ່ເປັນໂລກິຍະ ແລະໂລກຸດຕະຣະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ບຸກຄົນຜູ້ພຽບພ້ອມດ້ວຍມັກ ເປັນຜູ້ບໍລິບູນດ້ວຍສີນທີ່ເປັນໂລກິຍະແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ພຽບພ້ອມດ້ວຍມັກ ເປັນປຸຖຸຊົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໔໘໘] ສກ. ບຸກຄົນຜູ້ພຽບພ້ອມດ້ວຍມັກ ເປັນຜູ້ບໍລິບູນດ້ວຍສຳມາວາຈາທີ່ເປັນໂລກິຍະແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ພຽບພ້ອມດ້ວຍມັກ ເປັນຜູ້ບໍລິບູນດ້ວຍສຳມາທິດຖິທີ່ເປັນໂລກິຍະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ບຸກຄົນຜູ້ພຽບພ້ອມດ້ວຍມັກ ເປັນຜູ້ບໍລິບູນດ້ວຍສຳມາວາຈາທີ່ເປັນໂລກິຍະແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ພຽບພ້ອມດ້ວຍມັກ ເປັນຜູ້ບໍລິບູນດ້ວຍສຳມາສັງກັບປະທີ່ເປັນໂລກິຍະ ຯລຯ ສຳມາວາຍາມະທີ່ເປັນໂລກິຍະ ຯລຯ ສຳມາສະຕິທີ່ເປັນໂລກິຍະ ຯລຯ ສຳມາສະມາທິທີ່ເປັນໂລກິຍະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ພຽບພ້ອມດ້ວຍມັກ ເປັນຜູ້ບໍລິບູນດ້ວຍສຳມາກຳມັນຕະທີ່ເປັນໂລກິຍະ ຯລຯ ສຳມາອາຊີວະທີ່ເປັນໂລກິຍະແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ພຽບພ້ອມດ້ວຍມັກ ເປັນຜູ້ບໍລິບູນດ້ວຍສຳມາທິດຖິທີ່ເປັນໂລກິຍະ ຯລຯ ສຳມາສະມາທິທີ່ເປັນໂລກິຍະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ພຽບພ້ອມດ້ວຍມັກ ເປັນຜູ້ບໍລິບູນດ້ວຍສຳມາວາຈາທີ່ເປັນໂລກິຍະ ແລະໂລກຸດຕະຣະແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ພຽບພ້ອມດ້ວຍມັກ ເປັນຜູ້ບໍລິບູນດ້ວຍສຳມາທິດຖິທີ່ເປັນໂລກິຍະແລະໂລກຸດຕະຣະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ພຽບພ້ອມດ້ວຍມັກ ເປັນຜູ້ບໍລິບູນດ້ວຍສຳມາວາຈາທີ່ເປັນໂລກິຍະ ແລະໂລກຸດຕະຣະແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ພຽບພ້ອມດ້ວຍມັກ ເປັນຜູ້ບໍລິບູນດ້ວຍສຳມາສັງກັບປະທີ່ເປັນໂລກິຍະແລະໂລກຸດຕະຣະ ຯລຯ ສຳມາວາຍາມະທີ່ເປັນໂລກິຍະ ແລະໂລກຸດຕະຣະ ຯລຯ ສຳມາສະຕິທີ່ເປັນໂລກິຍະ ແລະໂລກຸດຕະຣະ ຯລຯ ສຳມາສະມາທິທີ່ເປັນໂລກິຍະແລະໂລກຸດຕະຣະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ພຽບພ້ອມດ້ວຍມັກ ເປັນຜູ້ບໍລິບູນດ້ວຍສຳມາກຳມັນຕະທີ່ເປັນໂລກິຍະແລະໂລກຸດຕະຣະ ຯລຯ ສຳມາອາຊີວະທີ່ເປັນໂລກິຍະ ແລະໂລກຸດຕະຣະແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ພຽບພ້ອມດ້ວຍມັກ ເປັນຜູ້ບໍລິບູນດ້ວຍສຳມາທິດຖິທີ່ເປັນໂລກິຍະແລະໂລກຸດຕະຣະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ພຽບພ້ອມດ້ວຍມັກ ເປັນຜູ້ບໍລິບູນດ້ວຍສຳມາອາຊີວະທີ່ເປັນໂລກິຍະ ແລະ ໂລກຸດຕະຣະແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ພຽບພ້ອມດ້ວຍມັກ ເປັນຜູ້ບໍລິບູນດ້ວຍສຳມາສັງກັບປະທີ່ເປັນໂລກິຍະ ແລະໂລກຸດຕະຣະ ฯລฯ ສຳມາສະມາທິທີ່ເປັນໂລກິຍະແລະໂລກຸດຕະຣະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[៤๗ល] ປຣ. ທ່ານບໍ່ຍອມຮັບວ່າ "ບຸກຄົນຜູ້ພຽບພ້ອມດ້ວຍມັກ ເປັນຜູ້ບໍລິບູນດ້ວຍສິນ " ແມ່ນບໍ?

ສກ. ແມ່ນ

ປຣ. ເມື່ອໂລກິຍະສິນດັບໄປແລ້ວ ມັກຈຶ່ງເກີດຂຶ້ນແມ່ນບໍ?

ສກ. ແມ່ນ

ປຣ. ບຸກຄົນຜູ້ທຸສິນ ມີສິນຂາດ ມີສິນທະລຸ ຈະເລີນມັກໄດ້ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ฯລฯ

ປຣ. ດັ່ງນັ້ນ ບຸກຄົນຜູ້ພຽບພ້ອມດ້ວຍມັກຈຶ່ງເປັນຜູ້ບໍລິບູນດ້ວຍສິນ ៨

**ທະວິທິສີເລທິກະຖາ ຈົບ**

## ៗ. ສີລັງອະເຈຕະສິກັນຕິກະຖາ (໑໐໑)

## ວ່າດ້ວຍສິນບໍ່ເປັນເຈຕະສິກ

[៤ល໐] ສກ. ສິນບໍ່ເປັນເຈຕະສິກແມ່ນບໍ?

ປຣ. ແມ່ນ

ສກ. ສິນເປັນຮູບ ฯລฯ ເປັນນິບພານ ฯລฯ ເປັນຈັກຂາຍະຕະນະ ฯລฯ ເປັນກາຍາຍະຕະນະ ฯລฯ ເປັນຮູປາຍະຕະນະ ฯລฯ ເປັນໂຜດຖັບພາຍະຕະນະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ສິນບໍ່ເປັນເຈຕະສິກແມ່ນບໍ?

ປຣ. ແມ່ນ

ສກ. ຜັດສະບໍ່ເປັນເຈຕະສິກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ສິນບໍ່ເປັນເຈຕະສິກແມ່ນບໍ?

ປຣ. ແມ່ນ

ສກ. ເວທະນາ ຯລຯ ສັນຍາ ຯລຯ ເຈຕະນາ ຯລຯ ສັດທາ ຯລຯ ວິຣິຍະ ຯລຯ ສະຕິ ຯລຯ ສະມາທິ ຯລຯ ປັນຍາບໍ່ເປັນເຈຕະສິກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຜັດສະເປັນເຈຕະສິກແມ່ນບໍ?

ປຣ. ແມ່ນ

ສກ. ສີນເປັນເຈຕະສິກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເວທະນາ ຯລຯ ສັນຍາ ຯລຯ ເຈຕະນາ ຯລຯ ສັດທາ ຯລຯ ວິຣິຍະ ຯລຯ ສະຕິ ຯລຯ ສະມາທິ ຯລຯ ປັນຍາເປັນເຈຕະສິກແມ່ນບໍ?

ປຣ. ແມ່ນ

ສກ. ສີນເປັນເຈຕະສິກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໕໙໑] ສກ. ສີນບໍ່ເປັນເຈຕະສິກແມ່ນບໍ?

ປຣ. ແມ່ນ

ສກ. ສີນມີຜົນທີ່ບໍ່ໜ້າປາຖະໜາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສີນມີຜົນທີ່ໜ້າປາຖະໜາບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກສີນມີຜົນທີ່ໜ້າປາຖະໜາ ທ່ານກໍບໍ່ຄວນຍອມຮັບວ່າ "ສີນບໍ່ເປັນເຈຕະສິກ"

ສກ. ສັດທາມີຜົນທີ່ໜ້າປາຖະໜາ ສັດທາເປັນເຈຕະສິກແມ່ນບໍ?

ປຣ. ແມ່ນ

ສກ. ສີນມີຜົນທີ່ໜ້າປາຖະໜາ ສີນເປັນເຈຕະສິກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວິຣິຍະ ຯລຯ ສະຕິ ຯລຯ ສະມາທິ ຯລຯ ປັນຍາມີຜົນທີ່ໜ້າປາຖະໜາ ປັນຍາເປັນເຈຕະສິກແມ່ນບໍ?

ປຣ. ແມ່ນ

ສກ. ສີນມີຜົນທີ່ໜ້າປາຖະໜາ ສີນເປັນເຈຕະສິກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສີນມີຜົນທີ່ໜ້າປາຖະໜາ ສີນບໍ່ເປັນເຈຕະສິກແມ່ນບໍ?

ປຣ. ແມ່ນ

ສກ. ສັດທາມີຜົນທີ່ໜ້າປາຖະໜາ ສັດທາບໍ່ເປັນເຈຕະສິກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສີນມີຜົນທີ່ໜ້າປາຖະໜາ ສີນບໍ່ເປັນເຈຕະສິກແມ່ນບໍ?

ປຣ. ແມ່ນ

ສກ. ວິຣິຍະ ຯລຯ ສະຕິ ຯລຯ ສະມາທິ ຯລຯ ປັນຍາມີຜົນທີ່ໜ້າປາຖະໜາ ປັນຍາບໍ່ເປັນເຈຕະສິກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໕໙໔] ສກ. ສີນບໍ່ເປັນເຈຕະສິກແມ່ນບໍ?

ປຣ. ແມ່ນ

ສກ. ສີນບໍ່ມີຜົນ ບໍ່ມີວິບາກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສີນມີຜົນມີວິບາກບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກສີນມີຜົນມີວິບາກ ທ່ານກໍບໍ່ຄວນຍອມຮັບວ່າ "ສີນບໍ່ເປັນເຈຕະສິກ" ຯລຯ

ສກ. ຈັກຂາຍະຕະນະບໍ່ເປັນເຈຕະສິກ ບໍ່ມີວິບາກແມ່ນບໍ?

ປຣ. ແມ່ນ

ສກ. ສີນບໍ່ເປັນເຈຕະສິກ ບໍ່ມີວິບາກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂສຕາຍະຕະນະ ຯລຯ ກາຍາຍະຕະນະ ຯລຯ ຣູປາຍະຕະນະ ຯລຯ ໂຜດຖັບພາຍະຕະນະ ບໍ່ເປັນເຈຕະສິກ ບໍ່ມີວິບາກແມ່ນບໍ?

ປຣ. ແມ່ນ

ສກ. ສີນບໍ່ເປັນເຈຕະສິກບໍ່ມີວິບາກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສີນບໍ່ເປັນເຈຕະສິກມີວິບາກແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂາຍະຕະນະບໍ່ເປັນເຈຕະສິກມີວິບາກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສີນບໍ່ເປັນເຈຕະສິກມີວິບາກແມ່ນບໍ?

ປຣ. ແມ່ນ

ສກ. ໂສຕາຍະຕະນະ ຯລຯ ກາຍາຍະຕະນະ ຯລຯ ຣູປາຍະຕະນະ ຯລຯ ໂຜດຖັບພາຍະຕະນະ ບໍ່ເປັນເຈຕະສິກ ມີວິບາກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໕໙໓] ສກ. ສຳມາວາຈາບໍ່ເປັນເຈຕະສິກແມ່ນບໍ?

ປຣ. ແມ່ນ

ສກ. ສຳມາທິດຖິບໍ່ເປັນເຈຕະສິກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສຳມາວາຈາບໍ່ເປັນເຈຕະສິກແມ່ນບໍ?

ປຣ. ແມ່ນ

ສກ. ສຳມາສັງກັບປະ ຯລຯ ສຳມາວາຍາມະ ຯລຯ ສຳມາສະຕິ ຯລຯ ສຳມາສະມາທິ ບໍ່ເປັນເຈຕະສິກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສຳມາກຳມັນຕະ ຯລຯ ສຳມາອາຊີວະ ບໍ່ເປັນເຈຕະສິກແມ່ນບໍ?

ປຣ. ແມ່ນ

ສກ. ສຳມາທິດຖິບໍ່ເປັນເຈຕະສິກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສຳມາອາຊີວະບໍ່ເປັນເຈຕະສິກແມ່ນບໍ?

ປຣ. ແມ່ນ

ສກ. ສຳມາສັງກັບປະ ຯລຯ ສຳມາວາຍາມະ ຯລຯ ສຳມາສະຕິ ຯລຯ ສຳມາສະມາທິ ບໍ່ເປັນເຈຕະສິກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສຳມາທິດຖິເປັນເຈຕະສິກແມ່ນບໍ?

ປຣ. ແມ່ນ

ສກ. ສຳມາວາຈາເປັນເຈຕະສິກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສຳມາທິດຖິເປັນເຈຕະສິກແມ່ນບໍ?

ປຣ. ແມ່ນ

ສກ. ສຳມາກຳມັນຕະ ຯລຯ ສຳມາອາຊີວະເປັນເຈຕະສິກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສຳມາສັງກັບປະ ຯລຯ ສຳມາວາຍາມະ ຯລຯ ສຳມາສະຕິ ຯລຯ ສຳມາສະມາທິ ເປັນເຈຕະສິກແມ່ນບໍ?

ປຣ. ແມ່ນ

ສກ. ສຳມາວາຈາເປັນເຈຕະສິກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສຳມາສະມາທິເປັນເຈຕະສິກແມ່ນບໍ?

ປຣ. ແມ່ນ

ສກ. ສຳມາກຳມັນຕະ ฯลฯ ສຳມາອາຊີວະ ເປັນເຈຕະສິກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

[໕໙໔] ປຣ. ທ່ານບໍ່ຍອມຮັບວ່າ "ສີນບໍ່ເປັນເຈຕະສິກ" ແມ່ນບໍ?

ສກ. ແມ່ນ

ປຣ. ເມື່ອສີນເກີດຂຶ້ນແລ້ວດັບໄປ ບຸກຄົນຜູ້ມີສີນດັບໄປແລ້ວນັ້ນເປັນຜູ້ທຸສີນແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ฯลฯ

ປຣ. ດັ່ງນັ້ນ ສີນຈຶ່ງບໍ່ເປັນເຈຕະສິກ

**ສີລັງອະເຈຕະສິກັນຕິກະຖາ ຈົບ**

## ໗. ສີລັງນະຈິດຕານຸປະຣິວັດຕິຕິກະຖາ (໑໐໘)

## ວ່າດ້ວຍສີນບໍ່ເປັນໄປຕາມຈິດ

[໕໙໕] ສກ. ສີນບໍ່ເປັນໄປຕາມຈິດແມ່ນບໍ?

ປຣ. ແມ່ນ

ສກ. ສີນເປັນຮູບ ฯลฯ ເປັນນິບພານ ฯลฯ ເປັນຈັກຂາຍະຕະນະ ฯลฯ ເປັນໂຜດຖັບພາຍະຕະນະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ສີນບໍ່ເປັນໄປຕາມຈິດແມ່ນບໍ?

ປຣ. ແມ່ນ

ສກ. ຜັດສະບໍ່ເປັນໄປຕາມຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ສີນບໍ່ເປັນໄປຕາມຈິດແມ່ນບໍ?

ປຣ. ແມ່ນ

ສກ. ເວທະນາ ฯลฯ ສັນຍາ ฯลฯ ເຈຕະນາ ฯลฯ ສັດທາ ฯลฯ ວິຣິຍະ ฯลฯ ສະຕິ ฯลฯ ສະມາທິ ฯลฯ ປັນຍາບໍ່ເປັນໄປຕາມຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ຜັດສະເປັນໄປຕາມຈິດແມ່ນບໍ?

ປຣ. ແມ່ນ

ສກ. ສີນເປັນໄປຕາມຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ເວທະນາ ฯลฯ ສັນຍາ ฯลฯ ເຈຕະນາ ฯลฯ ສັດທາ ฯลฯ ວິຣິຍະ ฯลฯ ສະຕິ ฯลฯ ສະມາທິ ฯลฯ ປັນຍາ ເປັນໄປຕາມຈິດແມ່ນບໍ?

ປຣ. ແມ່ນ

ສກ. ສີນເປັນໄປຕາມຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

[໕໙໖] ສກ. ສໍາມາວາຈາບໍ່ເປັນໄປຕາມຈິດແມ່ນບໍ?

ປຣ. ແມ່ນ

ສກ. ສໍາມາທິດຖິບໍ່ເປັນໄປຕາມຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ສໍາມາວາຈາບໍ່ເປັນໄປຕາມຈິດແມ່ນບໍ?

ປຣ. ແມ່ນ

ສກ. ສໍາມາສັງກັບປະ ฯลฯ ສໍາມາວາຍາມະ ฯลฯ ສໍາມາສະຕິ ฯลฯ ສໍາມາສະມາທິ ບໍ່ເປັນໄປຕາມຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ສໍາມາກໍາມັນຕະ ฯลฯ ສໍາມາອາຊີວະ ບໍ່ເປັນໄປຕາມຈິດແມ່ນບໍ?

ປຣ. ແມ່ນ

ສກ. ສໍາມາທິດຖິບໍ່ເປັນໄປຕາມຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ສໍາມາອາຊີວະບໍ່ເປັນໄປຕາມຈິດແມ່ນບໍ?

ປຣ. ແມ່ນ

ສກ. ສໍາມາສັງກັບປະ ฯลฯ ສໍາມາວາຍາມະ ฯลฯ ສໍາມາສະຕິ ฯลฯ ສໍາມາສະມາທິ ບໍ່ເປັນໄປຕາມຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ສໍາມາທິດຖິເປັນໄປຕາມຈິດແມ່ນບໍ?

ປຣ. ແມ່ນ

ສກ. ສໍາມາວາຈາເປັນໄປຕາມຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ສໍາມາທິດຖິເປັນໄປຕາມຈິດແມ່ນບໍ?

ປຣ. ແມ່ນ

ສກ. ສຳມາກຳມັນຕະ ຯລຯ ສຳມາອາຊີວະເປັນໄປຕາມຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສຳມາສັງກັບປະ ຯລຯ ສຳມາວາຍາມະ ຯລຯ ສຳມາສະຕິ ຯລຯ ສຳມາສະມາທິເປັນໄປຕາມຈິດແມ່ນບໍ?

ປຣ. ແມ່ນ

ສກ. ສຳມາວາຈາເປັນໄປຕາມຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສຳມາສະມາທິເປັນໄປຕາມຈິດແມ່ນບໍ?

ປຣ. ແມ່ນ

ສກ. ສຳມາກຳມັນຕະ ຯລຯ ສຳມາອາຊີວະ ເປັນໄປຕາມຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໕໙໗] ປຣ. ທ່ານບໍ່ຍອມຮັບວ່າ "ສີນບໍ່ເປັນໄປຕາມຈິດ" ແມ່ນບໍ?

ສກ. ແມ່ນ

ປຣ. ເມື່ອສີນເກີດຂຶ້ນແລ້ວດັບໄປ ບຸກຄົນຜູ້ມີສີນດັບໄປແລ້ວນັ້ນເປັນຜູ້ທຸສີນແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ດັ່ງນັ້ນ ສີນຈຶ່ງບໍ່ເປັນໄປຕາມຈິດ

**ສີລັງນະຈິດຕານຸປະຣິວັດຕິຕິກະຖາ ຈົບ**

## ໗. ສະມາທານະເຫຕຸກະຖາ (໑໐໖)

## ວ່າດ້ວຍສີນມີການສະມາທານເປັນເຫດ

[໕໙໘] ສກ. ສີນທີ່ມີການສະມາທານເປັນເຫດ ຈະເລີນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຜັດສະ ເວທະນາ ສັນຍາ ເຈຕະນາ ຈິດ ສັດທາ ວິຣິຍະ ສະຕິ ສະມາທິ ປັນຍາທີ່ມີການສະມາທານເປັນເຫດ ຈະເລີນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສີນທີ່ມີການສະມາທານເປັນເຫດ ຈະເລີນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ສີນຈະເລີນໄດ້ເໝືອນເຄືອເຂົາ ເໝືອນເຄືອຍ່ານຊາຍ ເໝືອນຕົ້ນໄມ້ ເໝືອນຕົ້ນຫຍ້າ ເໝືອນຫຍ້າປ້ອງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໔໙໙] ສກ. ສີນທີ່ມີການສະມາທານເປັນເຫດ ຈະເລີນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອບຸກຄົນສະມາທານະສີນແລ້ວ ນຶກເຖິງການວິຕົກ ນຶກເຖິງພະຍາບາດວິຕົກ ນຶກເຖິງວິຫິງສາວິຕົກຢູ່ ສີນຈະເລີນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ມີການປະຊຸມແຫ່ງຜັດສະ ໔ ຢ່າງ ຯລຯ ຈິດ ໔ ດວງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ມີການປະຊຸມແຫ່ງຜັດສະ ໔ ຢ່າງ ຯລຯ ຈິດ ໔ ດວງແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ເປັນກຸສົນແລະອະກຸສົນ ທີ່ມີໂທດແລະບໍ່ມີໂທດ ທີ່ຊົ່ວແລະປະນີດ ທີ່ເປັນຝ່າຍດຳ ເປັນຝ່າຍຂາວ ແລະເປັນຝ່າຍມີສ່ວນປຽບ ມາປະຊຸມກັນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ເປັນກຸສົນແລະອະກຸສົນ ທີ່ມີໂທດແລະບໍ່ມີໂທດ ທີ່ຊົ່ວແລະປະນີດ ທີ່ເປັນຝ່າຍດຳ ເປັນຝ່າຍຂາວ ແລະເປັນຝ່າຍມີສ່ວນປຽບ ມາປະຊຸມກັນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ສິ່ງທີ່ຢູ່ຫ່າງໄກກັນຫຼາຍແທ້ ໔ ຢ່າງນີ້

ສິ່ງທີ່ຢູ່ຫ່າງໄກກັນຫຼາຍແທ້ ໔ ຢ່າງ ອັນໃດແດ່ ຄື

໑. ທ້ອງຟ້າກັບແຜ່ນດິນ ນີ້ເປັນສິ່ງທີ່ຢູ່ຫ່າງໄກກັນຫຼາຍແທ້ຢ່າງທີ ໑

ຯລຯ

ຍ້ອນແນວນັ້ນ ທຳຂອງສັດຕະບຸຣຸດຈຶ່ງຫ່າງໄກກັນກັບທຳຂອງອະສັດຕະບຸຣຸດ"

ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ສະພາວະທຳທີ່ເປັນກຸສົນ ແລະອະກຸສົນທີ່ມີໂທດແລະບໍ່ມີໂທດ ທີ່ຊົ່ວແລະປະນີດ ທີ່ເປັນຝ່າຍດຳ ເປັນຝ່າຍຂາວ ແລະເປັນຝ່າຍມີສ່ວນປຽບມາປະຊຸມກັນໄດ້"

[໕໐໐] ປຣ. ທ່ານບໍ່ຍອມຮັບວ່າ "ສີນທີ່ມີການສະມາທານເປັນເຫດ ຈະເລີນໄດ້"ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ຊົນເຫຼົ່າໃດປູກສວນອັນໜ້າຮື່ນຣົມປູກປ່າ ຯລຯ ຊົນເຫຼົ່ານັ້ນດຳລົງຢູ່ໃນທຳ ສົມບູນດ້ວຍສີນແລ້ວຍ່ອມໄປສູ່ສະຫວັນ" ມີຢູ່ຈິງ ບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ສິນທີ່ມີການສະມາທານເປັນເຫດ ຈຶ່ງຈະເລີນໄດ້

**ສະມາທານະເຫຕຸກະຖາ ຈົບ**

# ໑໐. ວິນຍັດຕິສີລັນຕິກະຖາ (໑໐໔)
## ວ່າດ້ວຍວິນຍັດຕິເປັນສິນ

[ຜ໐໑] ສກ. ວິນຍັດຕິເປັນສິນແມ່ນບໍ?

ປຣ. ແມ່ນ

ສກ. ວິນຍັດຕິເປັນເຈຕະນາເຄື່ອງເວັ້ນຈາກການຂ້າສັດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວິນຍັດຕິເປັນເຈຕະນາເຄື່ອງເວັ້ນຈາກການລັກຊັບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວິນຍັດຕິເປັນເຈຕະນາເຄື່ອງເວັ້ນຈາກການປະພຶດຜິດໃນກາມແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວິນຍັດຕິເປັນເຈຕະນາເຄື່ອງເວັ້ນຈາກການເວົ້າຕົວະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວິນຍັດຕິເປັນເຈຕະນາເຄື່ອງເວັ້ນຈາກການເສບຂອງມຶນເມົາ ຄື ສຸຣາແລະເມໄຣ ອັນເປັນເຫດແຫ່ງຄວາມຜະໝາດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການຂາບໄຫວ້ເປັນສິນ ການລຸກຮັບເປັນສິນ ການເຮັດອັນຊະລີເປັນສິນ ການເຮັດສາມີຈິກຳເປັນສິນ ການຈັດອາສະນະໃຫ້ເປັນສິນ ການຈັດບ່ອນນອນໃຫ້ເປັນສິນ ການຈັດນ້ຳລ້າງຕີນໃຫ້ເປັນສິນ ການຈັດເກີບໃຫ້ເປັນສິນ ການນວດຫຼັງໃນເວລາອາບນ້ຳເປັນສິນແມ່ນບໍ?

ປຣ. ແມ່ນ

ສກ. ສິນເປັນເຈຕະນາເຄື່ອງເວັ້ນຈາກການຂ້າສັດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວິນຍັດຕິເປັນເຈຕະນາເຄື່ອງເວັ້ນຈາກການເສບຂອງມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[ຜ໐໔] ປຣ. ທ່ານບໍ່ຍອມຮັບວ່າ "ວິນຍັດຕິເປັນສິນ" ແມ່ນບໍ?

ສກ. ແມ່ນ

ປຣ. ວິນຍັດຕິເປັນຄວາມທຸສີນແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ດັ່ງນັ້ນ ວິນຍັດຈຶ່ງເປັນສີນ

# ໑໑. ອະວິນຍັດຕິທຸດສີລະຍັນຕິກະຖາ (໑໐໔)

## ວ່າດ້ວຍອະວິນຍັດຕິເປັນຄວາມທຸສີນ

[໖໐໓] ສກ. ອະວິນຍັດຕິເປັນຄວາມທຸສີນແມ່ນບໍ?

ປຣ. ແມ່ນ

ສກ. ອະວິນຍັດຕິເປັນປານາຕິບາດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະວິນຍັດຕິເປັນອະທິນນາທານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະວິນຍັດຕິເປັນກາເມສຸມິດສາຈານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະວິນຍັດຕິເປັນມຸສາວາທະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະວິນຍັດຕິເປັນສຸຣາເມຣະຍະມັດຊະປະມາທັດຖານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອບຸກຄົນຍຶດຖືບາບກຳ (ຕັ້ງໃຈເຮັດກຳຊົ່ວ) ແລ້ວໃຫ້ທານຢູ່ ບຸນແລະບາບ ທັງ ໒ ຢ່າງ ຈະເລີນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸນແລະບາບທັງ ໒ ຢ່າງຈະເລີນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ມີການປະຊຸມແຫ່ງຜັດສະ ໒ ຢ່າງ ຯລຯ ຈິດ ໒ ດວງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ມີການປະຊຸມແຫ່ງຜັດສະ ໒ ຢ່າງ ຯລຯ ຈິດ ໒ ດວງແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ເປັນກຸສົນແລະອະກຸສົນ ທີ່ມີໂທດແລະບໍ່ມີໂທດ ທີ່ຊົ່ວແລະປະນີດ ທີ່ເປັນຝ່າຍດຳ ເປັນຝ່າຍຂາວ ແລະເປັນຝ່າຍມີສ່ວນປຽບ ມາປະຊຸມກັນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ເປັນກຸສົນ ແລະອະກຸສົນ ທີ່ມີໂທດແລະບໍ່ມີໂທດ ທີ່ຊົ່ວແລະປະນີດ ທີ່ເປັນຝ່າຍດຳ ເປັນຝ່າຍຂາວ ແລະເປັນຝ່າຍມີສ່ວນປຽບ ມາປະຊຸມກັນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ສິ່ງທີ່ຢູ່ຫ່າງໄກກັນຫຼາຍແທ້ ໔ ຢ່າງນີ້

ສິ່ງທີ່ຢູ່ຫ່າງໄກກັນຫຼາຍແທ້ ໔ ຢ່າງ ອັນໃດແດ່ ຄື

໑. ທ້ອງຟ້າກັບແຜ່ນດິນ ນີ້ເປັນສິ່ງທີ່ຢູ່ຫ່າງໄກກັນຫຼາຍແທ້ຢ່າງທີ ໑

ฯລฯ

ຍ້ອນແນວນັ້ນ ທຳຂອງສັດຕະບຸຣຸດຈຶ່ງຫ່າງໄກກັນກັບທຳຂອງອະສັດຕະບຸຣຸດ"

ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ສະພາວະທຳທີ່ເປັນກຸສົນ ແລະອະກຸສົນ ທີ່ມີໂທດແລະບໍ່ມີໂທດ ທີ່ຊົ່ວແລະປະນີດ ທີ່ເປັນຝ່າຍດຳ ເປັນຝ່າຍຂາວ ແລະເປັນຝ່າຍມີສ່ວນປຽບ ມາປະຊຸມກັນໄດ້"

ສກ. ເມື່ອບຸກຄົນຍຶດຖືບາບກຳແລ້ວຖວາຍຈີວອນ ບິນທະບາດ ເສນາສະນະ ຄິລານະປັດໄຈເພສັດບໍຣິຂານ ຂາບໄຫວ້ຜູ້ຄວນຂາບໄຫວ້ ຕ້ອນຮັບຜູ້ຄວນຕ້ອນຮັບ ເຮັດອັນຊະລີແກ່ຜູ້ຄວນເຮັດອັນຊະລີ ເຮັດສາມີຈິກຳແກ່ຜູ້ຄວນເຮັດສາມີຈິກຳ ໃຫ້ອາສະນະແກ່ຜູ້ຄວນໃຫ້ອາສະນະ ໃຫ້ທາງແກ່ຜູ້ຄວນໃຫ້ທາງ ບຸນແລະບາບທັງ ໔ ຢ່າງຈະເລີນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ບຸນແລະບາບທັງ ໔ ຢ່າງ ຈະເລີນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ມີການປະຊຸມແຫ່ງຜັດສະ ໔ ຢ່າງ ฯລฯ ຈິດ ໔ ດວງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ມີການປະຊຸມແຫ່ງຜັດສະ ໔ ຢ່າງ ฯລฯ ຈິດ ໔ ດວງແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ເປັນກຸສົນແລະອະກຸສົນ ທີ່ມີໂທດແລະບໍ່ມີໂທດ ທີ່ຊົ່ວແລະປະນີດ ທີ່ເປັນຝ່າຍດຳ ເປັນຝ່າຍຂາວ ແລະເປັນຝ່າຍມີສ່ວນປຽບ ມາປະຊຸມກັນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ສະພາວະທຳທີ່ເປັນກຸສົນແລະອະກຸສົນ ທີ່ມີໂທດແລະບໍ່ມີໂທດ ທີ່ຊົ່ວແລະປະນີດ ທີ່ເປັນຝ່າຍດຳ ເປັນຝ່າຍຂາວ ແລະເປັນຝ່າຍມີສ່ວນປຽບ ມາປະຊຸມກັນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ສິ່ງທີ່ຢູ່ຫ່າງໄກກັນຫຼາຍແທ້ ໔ ຢ່າງນີ້ ສິ່ງທີ່ຢູ່ຫ່າງໄກກັນຫຼາຍແທ້ ໔ ຢ່າງ ອັນໃດແດ່ ຄື

໑. ທ້ອງຟ້າກັບແຜ່ນດິນ ນີ້ເປັນສິ່ງທີ່ຢູ່ຫ່າງໄກກັນຫຼາຍແທ້ຢ່າງທີ ໑

ຯລຯ

ຍ້ອນແນວນັ້ນ ທຳຂອງສັດຕະບຸຣຸດຈຶ່ງຫ່າງໄກກັນກັບທຳຂອງອະສັດຕະບຸຣຸດ"

ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ສະພາວະທຳທີ່ເປັນກຸສົນແລະອະກຸສົນທີ່ມີໂທດແລະບໍ່ມີໂທດ ທີ່ຊົ່ວແລະປະນີດ ທີ່ເປັນຝ່າຍດຳ ເປັນຝ່າຍຂາວ ແລະເປັນຝ່າຍມີສ່ວນປຽບ ມາປະຊຸມກັນໄດ້"

[໖໐໔] ປຣ. ທ່ານບໍ່ຍອມຮັບວ່າ "ອະວິນຍັດຕິເປັນຄວາມທຸສີນ" ແມ່ນບໍ?

ສກ. ແມ່ນ

ປຣ. ບຸກຄົນເປັນຜູ້ຍຶດຖືບາບກຳບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກບຸກຄົນເປັນຜູ້ຍຶດຖືບາບກຳ (ຕັ້ງໃຈເຮັດກຳຊົ່ວ) ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ອະວິນຍັດຕິເປັນຄວາມທຸສີນ"

**ອະວິນຍັດຕິທຸດສີລະຍັນຕິກະຖາ ຈົບ**

**ທະສະມະວັກ ຈົບ**

## ລວມກະຖາທີ່ມີໃນວັກນີ້ ຄື



**ທຸຕິຍະປັນນາດ ຈົບ**

## ລວມວັກທີ່ມີໃນທຸຕິຍະປັນນາດນີ້ ຄື

| | | |
|---|---|---|
| ວັກທີ | ໖ | ເລີ່ມດ້ວຍນິຍາມະກະຖາ |
| ວັກທີ | ໗ | ເລີ່ມດ້ວຍສັງຄະຫິຕະກະຖາ |
| ວັກທີ | ໘ | ເລີ່ມດ້ວຍສະກະຕິກະຖາ |
| ວັກທີ | ໙ | ເລີ່ມດ້ວຍອານິສັງສະທັດສາວີກະຖາ |
| ວັກທີ | ໑໐ | ເລີ່ມດ້ວຍນິໂຣທະກະຖາ |

# ໑໑. ເອກາທະສະມະວັກ

## ໑-໕. ຕິດໂສປີອະນຸສະຍະກະຖາ (໑໐໖-໑໐໘)

### ວ່າດ້ວຍອະນຸໄສ ໕ ເລື້ອງ

[໖໐໕] ສກ. ອະນຸໄສເປັນອັບພະຍາກະຕະແມ່ນບໍ?

ປຣ. ແມ່ນ

ສກ. ອະນຸໄສເປັນອັບພະຍາກະຕະຝ່າຍວິບາກ ອັບພະຍາກະຕະຝ່າຍກິຣິຍາ ເປັນຮູບ ເປັນນິບພານ ເປັນຈັກຂາຍະຕະນະ ຯລຯ ເປັນໂຜດຖັບພາຍະຕະນະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກາມຣາຄານຸໄສເປັນອັບພະຍາກະຕະແມ່ນບໍ?

ປຣ. ແມ່ນ

ສກ. ກາມຣາຄະ ກາມຣາຄະປະຣິຍຸດຖານ ກາມຣາຄະສັງໂຍດ ກາໂມຄະ ກາມໂຍຄະ ກາມສັນທະນິວອນ ເປັນອັບພະຍາກະຕະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກາມຣາຄະ ກາມຣາຄະປະຣິຍຸດຖານ ຯລຯ ກາມສັນທະນິວອນ ເປັນອະກຸສົນ ແມ່ນບໍ?

ປຣ. ແມ່ນ

ສກ. ກາມຣາຄານຸໄສເປັນອະກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ປະຕິຄານຸໄສເປັນອັບພະຍາກະຕະແມ່ນບໍ?

ປຣ. ແມ່ນ

ສກ. ປະຕິຄະ ປະຕິຄະປະຣິຍຸດຖານ ປະຕິຄະສັງໂຍດ ເປັນອັບພະຍາກະຕະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ປະຕິຄະ ປະຕິຄະປະຣິຍຸດຖານ ປະຕິຄະສັງໂຍດ ເປັນອະກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ປະຕິຄານຸໄສເປັນອະກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ມານານຸໄສເປັນອັບພະຍາກະຕະແມ່ນບໍ?

ປຣ. ແມ່ນ

ສກ. ມານະ ມານະປະຣິຍຸດຖານ ມານະສັງໂຍດ ເປັນອັບພະຍາກະຕະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ມານະ ມານະປະຣິຍຸດຖານ ມານະສັງໂຍດ ເປັນອະກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ມານານຸໄສເປັນອະກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ທິດຖານຸໄສເປັນອັບພະຍາກະຕະແມ່ນບໍ?

ປຣ. ແມ່ນ

ສກ. ທິດຖິ ທິດໂຖຄະ ທິດຖິໂຍຄະ ທິດຖິປະຣິຍຸດຖານ ທິດຖິສັງໂຍດ ເປັນອັບພະຍາກະຕະ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ທິດຖິ ທິດໂຖຄະ ທິດຖິໂຍຄະ ທິດຖິປະຣິຍຸດຖານ ທິດຖິສັງໂຍດ ເປັນອະກຸສົນ ແມ່ນບໍ?

ປຣ. ແມ່ນ

ສກ. ທິດຖານຸໄສເປັນອະກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ວິຈິກິດສານຸໄສເປັນອັບພະຍາກະຕະແມ່ນບໍ?

ປຣ. ແມ່ນ

ສກ. ວິຈິກິດສາ ວິຈິກິດສາປະຣິຍຸດຖານ ວິຈິກິດສາສັງໂຍດ ວິຈິກິດສານິວອນ ເປັນອັບພະຍາກະຕະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ວິຈິກິດສາ ວິຈິກິດສາປະຣິຍຸດຖານ ວິຈິກິດສາສັງໂຍດ ວິຈິກິດສານິວອນ ເປັນອະກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ວິຈິກິດສານຸໄສເປັນອະກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພະວະຣາຄານຸໄສເປັນອັບພະຍາກະຕະແມ່ນບໍ?

ປຣ. ແມ່ນ

ສກ. ພາວະຣາຄະ ພະວະຣາຄະປະຣິຍຸດຖານ ພະວະຣາຄະສັງໂຍດ ເປັນອັບພະຍາກະຕະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພະວະຣາຄະ ພະວະຣາຄະປະຣິຍຸດຖານ ພະວະຣາຄະສັງໂຍດ ເປັນອະກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ພະວະຣາຄານຸໄສເປັນອະກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະວິດຊານຸໄສເປັນອັບພະຍາກະຕະແມ່ນບໍ?

ປຣ. ແມ່ນ

ສກ. ອະວິດຊາ ອະວິດໂຊຄະ ອະວິດຊາໂຍຄະ ອະວິດຊາປະຣິຍຸດຖານ ອະວິດຊາສັງໂຍດ ອະວິດຊານິວອນ ເປັນອັບພະຍາກະຕະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະວິດຊາ ອະວິດໂຊຄະ ອະວິດຊາໂຍຄະ ອະວິດຊາປະຣິຍຸດຖານ ອະວິດຊາສັງໂຍດ ອະວິດຊານິວອນ ເປັນອະກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ອະວິດຊານຸໄສເປັນອະກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໖໐໖] ປຣ. ທ່ານບໍ່ຍອມຮັບວ່າ “ອະນຸໄສເປັນອັບພະຍາກະຕະ” ແມ່ນບໍ?

ສກ. ແມ່ນ

ປຣ. ປຸຖຸຊົນ ເມື່ອຈິດທີ່ເປັນກຸສົນແລະທີ່ເປັນອັບພະຍາກະຕະເປັນໄປຢູ່ ທ່ານຍອມຮັບວ່າ “ມີອະນຸໄສ” ແມ່ນບໍ?

ສກ. ແມ່ນ

ປຣ. ສະພາວະທຳທີ່ເປັນກຸສົນ ແລະອະກຸສົນມາປະຊຸມກັນໄດ້ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ດັ່ງນັ້ນ ອະນຸໄສຈຶ່ງເປັນອັບພະຍາກະຕະ

ປຣ. ປຸຖຸຊົນ ເມື່ອຈິດທີ່ເປັນກຸສົນ ແລະທີ່ເປັນອັບພະຍາກະຕະເປັນໄປຢູ່ ທ່ານຍອມຮັບວ່າ "ມີຣາຄະ" ແມ່ນບໍ?

ສກ. ແມ່ນ

ປຣ. ສະພາວະທຳທີ່ເປັນກຸສົນ ແລະອະກຸສົນມາປະຊຸມກັນໄດ້ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ໆລໆ

ປຣ. ດັ່ງນັ້ນ ຣາຄະຈຶ່ງເປັນອັບພະຍາກະຕະ

[ຜົວກ] ສກ. ອະນຸໄສເປັນອະເຫຕຸກະແມ່ນບໍ?

ປຣ. ແມ່ນ

ສກ. ອະນຸໄສເປັນຮູບ ເປັນນິບພານ ເປັນຈັກຂາຍະຕະນະ ໆລໆ ເປັນໂຜດຖັບພາຍະຕະນະ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ກາມຣາຄານຸໄສເປັນອະເຫຕຸກະແມ່ນບໍ?

ປຣ. ແມ່ນ

ສກ. ກາມຣາຄະ ກາມຣາຄະປະຣິຍຸດຖານ ກາມຣາຄະສັງໂຍດ ກາມສັນທະນິວອນ ເປັນອະເຫຕຸກະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ກາມຣາຄະ ກາມຣາຄະປະຣິຍຸດຖານ ໆລໆ ກາມສັນທະນິວອນ ເປັນສະເຫຕຸກະແມ່ນບໍ?

ປຣ. ແມ່ນ

ສກ. ກາມຣາຄານຸໄສເປັນສະເຫຕຸກະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ປະຕິຄານຸໄສ ໆລໆ ມານານຸໄສ ທິດຖານຸໄສ ວິຈິກິດສານຸໄສ ພະວະຣາຄານຸໄສ ໆລໆ ອະວິດຊານຸໄສ ເປັນອະເຫຕຸກະແມ່ນບໍ?

ປຣ. ແມ່ນ

ສກ. ອະວິດຊາ ອະວິດໂຊຄະ ອະວິດຊາໂຍຄະ ອະວິດຊາປະຣິຍຸດຖານ ອະວິດຊາສັງໂຍດ ອະວິດຊານິວອນ ເປັນອະເຫຕຸກະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ອະວິດຊາ ອະວິດໂຊຄະ ໆລໆ ອະວິດຊານິວອນ ເປັນສະເຫຕຸກະ ແມ່ນບໍ?

ປຣ. ແມ່ນ

ສກ. ອະວິດຊານຸໄສເປັນສະເຫຕຸກະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

[໖໐໗] ປຣ. ທ່ານບໍ່ຍອມຮັບວ່າ "ອະນຸໄສເປັນອະເຫຕຸກະ" ແມ່ນບໍ?

ສກ. ແມ່ນ

ປຣ. ປຸຖຸຊົນ ເມື່ອຈິດທີ່ເປັນກຸສົນ ແລະທີ່ເປັນອັບພະຍາກະຕະເປັນໄປຢູ່ ທ່ານຍອມຮັບວ່າ "ມີອະນຸໄສ" ແມ່ນບໍ?

ສກ. ແມ່ນ

ປຣ. ອະນຸໄສເປັນສະເຫຕຸກະໂດຍເຫດນັ້ນແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ດັ່ງນັ້ນ ອະນຸໄສຈຶ່ງເປັນອະເຫຕຸກະ

ປຣ. ປຸຖຸຊົນ ເມື່ອຈິດທີ່ເປັນກຸສົນ ແລະທີ່ເປັນອັບພະຍາກະຕະເປັນໄປຢູ່ ທ່ານຍອມຮັບວ່າ "ມີຣາຄະ" ແມ່ນບໍ?

ສກ. ແມ່ນ

ປຣ. ຣາຄະເປັນສະເຫຕຸກະໂດຍເຫດນັ້ນແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ດັ່ງນັ້ນ ຣາຄະຈຶ່ງເປັນອະເຫຕຸກະ

[໖໐໙] ສກ. ອະນຸໄສ ວິບປະຍຸດຈາກຈິດແມ່ນບໍ?

ປຣ. ແມ່ນ

ສກ. ອະນຸໄສເປັນຮູບ ເປັນນິບພານ ເປັນຈັກຂາຍະຕະນະ ຯລຯ ເປັນໂຜດຖັບພາຍະຕະນະ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກາມຣາຄານຸໄສ ວິບປະຍຸດຈາກຈິດແມ່ນບໍ?

ປຣ. ແມ່ນ

ສກ. ກາມຣາຄະ ກາມຣາຄະປະຣິຍຸດຖານ ກາມຣາຄະສັງໂຍດ ກາໂມຄະ ກາມໂຍຄະ ກາມສັນທະນິວອນ ວິບປະຍຸດຈາກຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກາມຣາຄະ ກາມຣາຄະປະຣິຍຸດຖານ ຯລຯ ກາມສັນທະນິວອນ ສຳປະຍຸດດ້ວຍຈິດແມ່ນບໍ?

ປຣ. ແມ່ນ

ສກ. ກາມຣາຄານຸໄສ ສຳປະຍຸດດ້ວຍຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໖໑໐] ສກ. ກາມຣາຄານຸໄສ ວິບປະຍຸດຈາກຈິດແມ່ນບໍ?

ປຣ. ແມ່ນ

ສກ. ການຣາຄານຸໄສນັບເນື່ອງໃນຂັນໃດ?

ປຣ. ນັບເນື່ອງໃນສັງຂານຂັນ

ສກ. ສັງຂານຂັນ ວິບປະຍຸດຈາກຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສັງຂານຂັນ ວິບປະຍຸດຈາກຈິດແມ່ນບໍ?

ປຣ. ແມ່ນ

ສກ. ເວທະນາຂັນ ສັນຍາຂັນ ວິບປະຍຸດຈາກຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການຣາຄານຸໄສນັບເນື່ອງໃນສັງຂານຂັນ ແຕ່ວິບປະຍຸດຈາກຈິດແມ່ນບໍ?

ປຣ. ແມ່ນ

ສກ. ການຣາຄະນັບເນື່ອງໃນສັງຂານຂັນ ແຕ່ວິບປະຍຸດຈາກຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການຣາຄະນັບເນື່ອງໃນສັງຂານຂັນ ສຳປະຍຸດດ້ວຍຈິດແມ່ນບໍ?

ປຣ. ແມ່ນ

ສກ. ການຣາຄານຸໄສນັບເນື່ອງໃນສັງຂານຂັນ ສຳປະຍຸດດ້ວຍຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການຣາຄານຸໄສນັບເນື່ອງໃນສັງຂານຂັນ ແຕ່ວິບປະຍຸດຈາກຈິດ ສ່ວນການຣາຄະນັບເນື່ອງໃນສັງຂານຂັນ ແລະສຳປະຍຸດດ້ວຍຈິດແມ່ນບໍ?

ປຣ. ແມ່ນ

ສກ. ສັງຂານຂັນສ່ວນໜຶ່ງສຳປະຍຸດດ້ວຍຈິດ ອີກສ່ວນໜຶ່ງວິບປະຍຸດຈາກຈິດ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສັງຂານຂັນສ່ວນໜຶ່ງສຳປະຍຸດດ້ວຍຈິດ ອີກສ່ວນໜຶ່ງວິບປະຍຸດຈາກຈິດ ແມ່ນບໍ?

ປຣ. ແມ່ນ

ສກ. ເວທະນາຂັນ ສັນຍາຂັນ ສ່ວນໜຶ່ງສຳປະຍຸດດ້ວຍຈິດ ອີກສ່ວນໜຶ່ງວິບປະຍຸດຈາກຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[ຜ໑໑] ສກ. ປະຕິຄານຸໄສ ມານານຸໄສ ທິດຖານຸໄສ ວິຈິກິດສານຸໄສ ພະວະຣາຄານຸໄສ ອະວິດຊານຸໄສ ວິບປະຍຸດຈາກຈິດແມ່ນບໍ?

ປຣ. ແມ່ນ

ສກ. ອະວິດຊາ ອະວິດໂຊຄະ ອະວິດຊາໂຍຄະ ອະວິດຊານິວອນ ວິບປະຍຸດຈາກຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ອະວິດຊາ ອະວິດໂຊຄະ ອະວິດຊາໂຍຄະ ອະວິດຊານິວອນ ສຳປະຍຸດດ້ວຍຈິດແມ່ນບໍ?

ປຣ. ແມ່ນ

ສກ. ອະວິດຊານຸໄສສຳປະຍຸດດ້ວຍຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

[ຜ໑໘] ສກ. ອະວິດຊານຸໄສ ວິບປະຍຸດຈາກຈິດແມ່ນບໍ?

ປຣ. ແມ່ນ

ສກ. ອະວິດຊານຸໄສ ນັບເນື່ອງໃນຂັນໃດ?

ປຣ. ນັບເນື່ອງໃນສັງຂານຂັນ

ສກ. ສັງຂານຂັນ ວິບປະຍຸດຈາກຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ສັງຂານຂັນ ວິບປະຍຸດຈາກຈິດແມ່ນບໍ?

ປຣ. ແມ່ນ

ສກ. ເວທະນາຂັນ ສັນຍາຂັນ ວິບປະຍຸດຈາກຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ອະວິດຊານຸໄສນັບເນື່ອງໃນສັງຂານຂັນ ແຕ່ວິບປະຍຸດຈາກຈິດແມ່ນບໍ?

ປຣ. ແມ່ນ

ສກ. ອະວິດຊານັບເນື່ອງໃນສັງຂານຂັນ ແຕ່ວິບປະຍຸດຈາກຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ອະວິດຊານັບເນື່ອງໃນສັງຂານຂັນ ສຳປະຍຸດດ້ວຍຈິດແມ່ນບໍ?

ປຣ. ແມ່ນ

ສກ. ອະວິດຊານຸໄສນັບເນື່ອງໃນສັງຂານຂັນ ສຳປະຍຸດດ້ວຍຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ອະວິດຊານຸໄສນັບເນື່ອງໃນສັງຂານຂັນ ແຕ່ວິບປະຍຸດຈາກຈິດ ສ່ວນອະວິດຊານັບເນື່ອງໃນສັງຂານຂັນ ແລະສຳປະຍຸດດ້ວຍຈິດແມ່ນບໍ?

ປຣ. ແມ່ນ

ສກ. ສັງຂານຂັນສ່ວນໜຶ່ງສຳປະຍຸດດ້ວຍຈິດ ອີກສ່ວນໜຶ່ງວິບປະຍຸດຈາກຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ສັງຂານຂັນສ່ວນໜຶ່ງສຳປະຍຸດດ້ວຍຈິດ ອີກສ່ວນໜຶ່ງວິບປະຍຸດຈາກຈິດແມ່ນບໍ?

ປຣ. ແມ່ນ

ສກ. ເວທະນາຂັນ ສັນຍາຂັນ ສ່ວນໜຶ່ງສຳປະຍຸດດ້ວຍຈິດ ອີກສ່ວນໜຶ່ງວິບປະຍຸດຈາກຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[ຜ໑໓] ປຣ. ທ່ານບໍ່ຍອມຮັບວ່າ "ອະນຸໄສ ວິບປະຍຸດຈາກຈິດ" ແມ່ນບໍ?

ສກ. ແມ່ນ

ປຣ. ປຸຖຸຊົນ ເມື່ອຈິດທີ່ເປັນກຸສົນ ແລະທີ່ເປັນອັບພະຍາກະຕະເປັນໄປຢູ່ ທ່ານຍອມຮັບວ່າ "ມີອະນຸໄສ" ແມ່ນບໍ?

ສກ. ແມ່ນ

ປຣ. ອະນຸໄສ ສຳປະຍຸດດ້ວຍຈິດນັ້ນແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ດັ່ງນັ້ນ ອະນຸໄສຈຶ່ງວິບປະຍຸດຈາກຈິດ

ປຣ. ປຸຖຸຊົນ ເມື່ອຈິດທີ່ເປັນກຸສົນ ແລະທີ່ເປັນອັບພະຍາກະຕະເປັນໄປຢູ່ ທ່ານຍອມຮັບວ່າ "ມີຣາຄະ" ແມ່ນບໍ?

ສກ. ແມ່ນ

ປຣ. ຣາຄະ ສຳປະຍຸດດ້ວຍຈິດນັ້ນແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ

ປຣ. ດັ່ງນັ້ນ ຣາຄະຈຶ່ງວິບປະຍຸດຈາກຈິດ

**ຕິດໂສປິອະນຸສະຍະກະຖາ ຈົບ**

## ໔. ຍານະກະຖາ (໑໐໗)

## ວ່າດ້ວຍຍານ

[ຜ໑໔] ສກ. ພຣະອະຣິຍະບຸກຄົນເມື່ອຄວາມບໍ່ຮູ້ຫາຍໄປແລ້ວ ເມື່ອຈິດທີ່ວິບປະຍຸດຈາກຍານເປັນໄປຢູ່ ທ່ານບໍ່ຍອມຮັບວ່າ "ມີຍານ" ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣິຍະບຸກຄົນເມື່ອຣາຄະຫາຍໄປແລ້ວ ທ່ານບໍ່ຍອມຮັບວ່າ "ປາສະຈາກຣາຄະ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣິຍະບຸກຄົນ ເມື່ອຄວາມບໍ່ຮູ້ຫາຍໄປແລ້ວ ເມື່ອຈິດທີ່ວິບປະຍຸດຈາກຍານເປັນໄປຢູ່ ທ່ານບໍ່ຍອມຮັບວ່າ "ມີຍານ" ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣິຍະບຸກຄົນ ເມື່ອໂທສະຫາຍໄປແລ້ວ ໂມຫະຫາຍໄປແລ້ວ ກິເລດຫາຍໄປແລ້ວ ທ່ານບໍ່ຍອມຮັບວ່າ "ໝົດກິເລດ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣິຍະບຸກຄົນ ເມື່ອຣາຄະຫາຍໄປແລ້ວ ທ່ານຍອມຮັບວ່າ "ປາສະຈາກຣາຄະ" ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣິຍະບຸກຄົນເມື່ອຄວາມບໍ່ຮູ້ຫາຍໄປແລ້ວ ເມື່ອຈິດທີ່ວິບປະຍຸດຈາກຍານເປັນໄປຢູ່ ທ່ານຍອມຮັບວ່າ "ມີຍານ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣິຍະບຸກຄົນເມື່ອໂທສະຫາຍໄປແລ້ວ ເມື່ອໂມຫະຫາຍໄປແລ້ວ ເມື່ອກິເລດຫາຍໄປແລ້ວ ທ່ານຍອມຮັບວ່າ "ໝົດກິເລດ" ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣິຍະບຸກຄົນເມື່ອຄວາມບໍ່ຮູ້ຫາຍໄປແລ້ວ ເມື່ອຈິດທີ່ວິບປະຍຸດຈາກຍານເປັນໄປຢູ່ ທ່ານຍອມຮັບວ່າ "ມີຍານ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໖໑໕] ປຣ. ພຣະອະຣິຍະບຸກຄົນເມື່ອຄວາມບໍ່ຮູ້ຫາຍໄປແລ້ວ ເມື່ອຈິດທີ່ວິບປະຍຸດຈາກຍານເປັນໄປຢູ່ ທ່ານຍອມຮັບວ່າ "ມີຍານ" ແມ່ນບໍ?

ສກ. ແມ່ນ

ປຣ. ຊື່ວ່າມີຍານ ດ້ວຍຍານທີ່ເປັນອະດີດ ຊື່ວ່າມີຍານ ດ້ວຍຍານທີ່ດັບໄປແລ້ວ ຫາຍໄປແລ້ວ ລະງັບໄປແລ້ວແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

**ຍານະກະຖາ ຈົບ**

## ໕. ຍານັງຈິດຕະວິບປະຍຸດຕັນຕິກະຖາ (໑໑໐)

## ວ່າດ້ວຍຍານວິບປະຍຸດຈາກຈິດ

[໖໑໖] ສກ. ຍານ ວິບປະຍຸດຈາກຈິດແມ່ນບໍ?

ປຣ.໑ ແມ່ນ

ສກ. ຍານເປັນຮູບ ເປັນນິບພານ ເປັນຈັກຂາຍະຕະນະ ฯลฯ ເປັນໂຜດຖັບພາຍະຕະນະ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ຍານ ວິບປະຍຸດຈາກຈິດແມ່ນບໍ?

ປຣ. ແມ່ນ

ສກ. ປັນຍາ ປັນຍິນຊີ ປັນຍາພະລະ ສຳມາທິດຖິ ທຳມະວິຈະຍະສຳໂພດຊົງວິບປະຍຸດຈາກຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ປັນຍາ ປັນຍິນຊີ ປັນຍາພະລະ ສຳມາທິດຖິ ທຳມະວິຈະຍະສຳໂພດຊົງ ສຳປະຍຸດດ້ວຍຈິດແມ່ນບໍ?

ປຣ. ແມ່ນ

ສກ. ຍານ ສຳປະຍຸດດ້ວຍຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ຍານ ວິບປະຍຸດຈາກຈິດແມ່ນບໍ?

ປຣ. ແມ່ນ

ສກ. ຍານ ນັບເນື່ອງໃນຂັນໃດ?

ປຣ. ນັບເນື່ອງໃນສັງຂານຂັນ

ສກ. ສັງຂານຂັນ ວິບປະຍຸດຈາກຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ສັງຂານຂັນ ວິບປະຍຸດຈາກຈິດແມ່ນບໍ?

ປຣ. ແມ່ນ

ສກ. ເວທະນາຂັນ ສັນຍາຂັນ ວິບປະຍຸດຈາກຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ຍານນັບເນື່ອງໃນສັງຂານຂັນ ແຕ່ວິບປະຍຸດຈາກຈິດແມ່ນບໍ?

ປຣ. ແມ່ນ

ສກ. ປັນຍານັບເນື່ອງໃນສັງຂານຂັນ ແຕ່ວິບປະຍຸດຈາກຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ປັນຍານັບເນື່ອງໃນສັງຂານຂັນ ສຳປະຍຸດດ້ວຍຈິດແມ່ນບໍ?

ປຣ. ແມ່ນ

ສກ. ຍານນັບເນື່ອງໃນສັງຂານຂັນ ສຳປະຍຸດດ້ວຍຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

ສກ. ຍານນັບເນື່ອງໃນສັງຂານຂັນ ແຕ່ວິບປະຍຸດຈາກຈິດ ປັນຍານັບເນື່ອງໃນສັງຂານຂັນ ແລະສຳປະຍຸດດ້ວຍຈິດແມ່ນບໍ?

ປຣ. ແມ່ນ

ສກ. ສັງຂານຂັນສ່ວນໜຶ່ງສຳປະຍຸດດ້ວຍຈິດ ອີກສ່ວນໜຶ່ງວິບປະຍຸດຈາກຈິດ ແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

ສກ. ສັງຂານຂັນສ່ວນໜຶ່ງສຳປະຍຸດດ້ວຍຈິດ ອີກສ່ວນໜຶ່ງວິບປະຍຸດຈາກຈິດ ແມ່ນບໍ?

ປຣ. ແມ່ນ

ສກ. ເວທະນາຂັນ ສັນຍາຂັນ ສ່ວນໜຶ່ງສຳປະຍຸດດ້ວຍຈິດ ອີກສ່ວນໜຶ່ງວິບປະຍຸດຈາກຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

[ຜ໑໗] ປຣ. ທ່ານບໍ່ຍອມຮັບວ່າ “ຍານວິບປະຍຸດຈາກຈິດ” ແມ່ນບໍ?

ສກ. ແມ່ນ

ປຣ. ພຣະອະຣະຫັນຜູ້ພຽບພ້ອມດ້ວຍຈັກຂຸວິນຍານ ທ່ານຍອມຮັບວ່າ “ມີຍານ” ແມ່ນບໍ?

ສກ. ແມ່ນ

ປຣ. ຍານ ສຳປະຍຸດດ້ວຍຈິດນັ້ນແມ່ນບໍ?

ສກ. ບໍ່ຄວນກ່າວແບບນັ້ນ ຯລຯ

ປຣ. ດັ່ງນັ້ນ ຍານຈຶ່ງວິບປະຍຸດຈາກຈິດ

ປຣ. ພຣະອະຣະຫັນຜູ້ພຽບພ້ອມດ້ວຍຈັກຂຸວິນຍານ ທ່ານຍອມຮັບວ່າ “ມີປັນຍາ” ແມ່ນບໍ?

ສກ. ແມ່ນ

ປຣ. ປັນຍາ ສຳປະຍຸດດ້ວຍຈິດນັ້ນແມ່ນບໍ?

ສກ. ບໍ່ຄວນກ່າວແບບນັ້ນ ຯລຯ

ປຣ. ດັ່ງນັ້ນ ປັນຍາຈຶ່ງວິບປະຍຸດຈາກຈິດ

**ຍານັງຈິດຕະວິບປະຍຸດຕັນຕິກະຖາ ຈົບ**

## ໖. ອິທັງທຸກຂັນຕິກະຖາ (໑໑໑)

## ວ່າດ້ວຍການເປ່ງວາຈາວ່ານີ້ທຸກ

[ຜ໑໘] ສກ. ເມື່ອເປ່ງວາຈາວ່າ “ນີ້ທຸກ” ຍານວ່າ “ນີ້ທຸກ” ຈຶ່ງດຳເນີນໄປແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອເປ່ງວາຈາວ່າ "ນີ້ທຸກຂະສະມຸໄທ" ຍານວ່າ "ນີ້ທຸກຂະສະມຸໄທ" ຈຶ່ງດຳເນີນໄປແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອເປ່ງວາຈາວ່າ "ນີ້ທຸກ" ຍານວ່າ "ນີ້ທຸກ" ຈຶ່ງດຳເນີນໄປແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອເປ່ງວາຈາວ່າ "ນີ້ທຸກຂະນິໂຣທະ" ຍານວ່າ "ນີ້ທຸກຂະນິໂຣທະ" ຈຶ່ງດຳເນີນໄປແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອເປ່ງວາຈາວ່າ "ນີ້ທຸກ" ຍານວ່າ "ນີ້ທຸກ" ຈຶ່ງດຳເນີນໄປແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອເປ່ງວາຈາວ່າ "ນີ້ມັກ" ຍານວ່າ "ນີ້ມັກ" ຈຶ່ງດຳເນີນໄປແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອເປ່ງວາຈາວ່າ "ນີ້ສະມຸໄທ" ແຕ່ຍານວ່າ "ນີ້ສະມຸໄທ" ບໍ່ດຳເນີນໄປ ແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອເປ່ງວາຈາວ່າ "ນີ້ທຸກ" ແຕ່ຍານວ່າ "ນີ້ທຸກ" ບໍ່ດຳເນີນໄປແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອເປ່ງວາຈາວ່າ "ນີ້ນິໂຣດ" ຯລຯ ເມື່ອເປ່ງວາຈາວ່າ "ນີ້ມັກ" ແຕ່ຍານວ່າ "ນີ້ມັກ" ບໍ່ດຳເນີນໄປແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອເປ່ງວາຈາວ່າ "ນີ້ທຸກ" ແຕ່ຍານວ່າ "ນີ້ທຸກ" ບໍ່ດຳເນີນໄປແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[ຜ໑໙] ສກ. ເມື່ອເປ່ງວາຈາວ່າ "ນີ້ທຸກ" ຍານວ່າ "ນີ້ທຸກ" ຈຶ່ງດຳເນີນໄປແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອເປ່ງວາຈາວ່າ "ຮູບບໍ່ທ່ຽງ" ຍານວ່າ "ຮູບບໍ່ທ່ຽງ" ຈຶ່ງດຳເນີນໄປແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອເປ່ງວາຈາວ່າ "ນີ້ທຸກ" ຍານວ່າ "ນີ້ທຸກ" ຈຶ່ງດຳເນີນໄປແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອເປ່ງວາຈາວ່າ "ເວທະນາບໍ່ທ່ຽງ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານບໍ່ທ່ຽງ" ຍານວ່າ "ວິນຍານບໍ່ທ່ຽງ" ຈຶ່ງດຳເນີນໄປແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອເປ່ງວາຈາວ່າ "ນີ້ທຸກ" ຍານວ່າ "ນີ້ທຸກ" ຈຶ່ງດຳເນີນໄປແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອເປ່ງວາຈາວ່າ "ຮູບເປັນອະນັດຕາ" ຍານວ່າ "ຮູບເປັນອະນັດຕາ" ຈຶ່ງ ດຳເນີນໄປແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອເປ່ງວາຈາວ່າ "ນີ້ທຸກ" ຍານວ່າ "ນີ້ທຸກ" ຈຶ່ງດຳເນີນໄປແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອເປ່ງວາຈາວ່າ "ເວທະນາເປັນອະນັດຕາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານເປັນອະນັດຕາ" ຍານວ່າ "ວິນຍານເປັນອະນັດຕາ" ຈຶ່ງດຳເນີນໄປແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອເປ່ງວ່າ "ຮູບບໍ່ທ່ຽງ" ແຕ່ຍານວ່າ "ຮູບບໍ່ທ່ຽງ" ບໍ່ດຳເນີນໄປ ແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອເປ່ງວາຈາວ່າ "ນີ້ທຸກ" ແຕ່ຍານວ່າ "ນີ້ທຸກ" ບໍ່ດຳເນີນໄປແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອເປ່ງວາຈາວ່າ "ເວທະນາບໍ່ທ່ຽງ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານບໍ່ທ່ຽງ" ແຕ່ຍານວ່າ "ວິນຍານບໍ່ທ່ຽງ" ບໍ່ດຳເນີນໄປແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອເປ່ງວາຈາວ່າ "ນີ້ທຸກ" ແຕ່ຍານວ່າ "ນີ້ທຸກ" ບໍ່ດຳເນີນໄປແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອເປ່ງວາຈາວ່າ "ຮູບເປັນອະນັດຕາ" ແຕ່ຍານວ່າ "ຮູບເປັນອະນັດຕາ" ບໍ່ດຳເນີນໄປແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອເປ່ງວາຈາວ່າ "ນີ້ທຸກ" ແຕ່ຍານວ່າ "ນີ້ທຸກ" ບໍ່ດຳເນີນໄປແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອເປ່ງວາຈາວ່າ "ເວທະນາເປັນອະນັດຕາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານເປັນອະນັດຕາ" ແຕ່ຍານວ່າ "ວິນຍານເປັນອະນັດຕາ" ບໍ່ດຳເນີນໄປແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອເປ່ງວາຈາວ່າ "ນີ້ທຸກ" ແຕ່ຍານວ່າ "ນີ້ທຸກ" ບໍ່ດຳເນີນໄປແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໖໔໐] ສກ. ເມື່ອເປ່ງວາຈາວ່າ "ນີ້ທຸກ" ຍານວ່າ "ນີ້ທຸກ" ຈຶ່ງດຳເນີນໄປແມ່ນບໍ?

ປຣ. ແມ່ນ

ສກ. ຍານວ່າ "ອີ" ວ່າ "ທັງ" ວ່າ "ທຸ" ແລະວ່າ "ຂັງ" ຈຶ່ງດຳເນີນໄປແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

**ອີທັງທຸກຂັນຕີກະຖາ ຈົບ**

## ໗. ອິດທິພະລະກະຖາ (໑໑໘)

## ວ່າດ້ວຍກຳລັງລິດ

[໖໘໑] ສກ. ບຸກຄົນຜູ້ພຽບພ້ອມດ້ວຍກຳລັງລິດ ເພິ່ງດຳລົງຢູ່ໄດ້ຕະຫຼອດກັບແມ່ນບໍ?

ປຣ. ແມ່ນ

ສກ. ອາຍຸນັ້ນສຳເລັດໄດ້ດ້ວຍລິດ ຄະຕິນັ້ນສຳເລັດໄດ້ດ້ວຍລິດ ການໄດ້ອັດຕະພາບນັ້ນກໍສຳເລັດໄດ້ດ້ວຍລິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ພຽບພ້ອມດ້ວຍກຳລັງລິດ ເພິ່ງດຳລົງຢູ່ໄດ້ຕະຫຼອດກັບແມ່ນບໍ?

ປຣ. ແມ່ນ

ສກ. ເພິ່ງດຳລົງຢູ່ໄດ້ຕະຫຼອດກັບທີ່ເປັນອະດີດ ຕະຫຼອດກັບທີ່ເປັນອະນາຄົດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ພຽບພ້ອມດ້ວຍກຳລັງລິດ ເພິ່ງດຳລົງຢູ່ໄດ້ຕະຫຼອດກັບແມ່ນບໍ?

ປຣ. ແມ່ນ

ສກ. ເພິ່ງດຳລົງຢູ່ໄດ້ຕະຫຼອດ ໒-໓-໔ ກັບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ພຽບພ້ອມດ້ວຍກຳລັງລິດ ເພິ່ງດຳລົງຢູ່ໄດ້ຕະຫຼອດກັບແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອຍັງມີອາຍຸ ກໍດຳລົງຢູ່ເທົ່າທີ່ອາຍຸຍັງເຫຼືອຢູ່ ຫຼື ວ່າເມື່ອໝົດອາຍຸກໍດຳລົງຢູ່ເທົ່າທີ່ອາຍຸຍັງເຫຼືອຢູ່

ປຣ. ເມື່ອຍັງມີອາຍຸ ກໍດຳລົງຢູ່ເທົ່າທີ່ອາຍຸຍັງເຫຼືອຢູ່ໄດ້

ສກ. ຫາກເມື່ອຍັງມີອາຍຸ ກໍດຳລົງຢູ່ເທົ່າທີ່ອາຍຸຍັງເຫຼືອຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ບຸກຄົນຜູ້ພຽບພ້ອມດ້ວຍກຳລັງລິດ ເພິ່ງດຳລົງຢູ່ໄດ້ຕະຫຼອດກັບ" ຯລຯ ເມື່ອຍັງມີອາຍຸ ກໍດຳລົງຢູ່ເທົ່າທີ່ອາຍຸຍັງເຫຼືອຢູ່ ຫຼື ວ່າເມື່ອໝົດອາຍຸກໍດຳລົງຢູ່ເທົ່າທີ່ອາຍຸຍັງເຫຼືອຢູ່

ປຣ. ເມື່ອໝົດອາຍຸ ກໍດຳລົງຢູ່ເທົ່າທີ່ອາຍຸຍັງເຫຼືອຢູ່

ສກ. ບຸກຄົນທີ່ຕາຍແລ້ວ ເພິ່ງດຳລົງຢູ່ໄດ້ ຫຼື ວ່າບຸກຄົນທີ່ທຳກາລະແລ້ວເພິ່ງດຳລົງຢູ່ໄດ້

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໖໔໔] ສກ. ບຸກຄົນຜູ້ພຽບພ້ອມດ້ວຍກຳລັງລິດ ເພິ່ງດຳລົງຢູ່ໄດ້ຕະຫຼອດກັບ ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນໃຊ້ລິດບັງຄັບວ່າ "ຜັດສະທີ່ເກີດຂຶ້ນແລ້ວຢ່າດັບໄປເລີຍ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນໃຊ້ລິດບັງຄັບວ່າ "ເວທະນາທີ່ເກີດຂຶ້ນແລ້ວຢ່າດັບໄປເລີຍ ຯລຯ ສັນຍາທີ່ເກີດຂຶ້ນແລ້ວ ຯລຯ ເຈຕະນາທີ່ເກີດຂຶ້ນແລ້ວ ຯລຯ ຈິດທີ່ເກີດຂຶ້ນແລ້ວ ຯລຯ ສັດທາທີ່ເກີດຂຶ້ນແລ້ວ ຯລຯ ວິຣິຍະທີ່ເກີດຂຶ້ນແລ້ວ ຯລຯ ສະຕິທີ່ເກີດຂຶ້ນແລ້ວ ຯລຯ ສະມາທິທີ່ເກີດຂຶ້ນແລ້ວ ຯລຯ ປັນຍາທີ່ເກີດຂຶ້ນແລ້ວຢ່າດັບໄປເລີຍ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ພຽບພ້ອມດ້ວຍກຳລັງລິດ ເພິ່ງດຳລົງຢູ່ໄດ້ຕະຫຼອດກັບແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນໃຊ້ລິດບັງຄັບວ່າ "ຮູບຈົ່ງເປັນຂອງທ່ຽງ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນໃຊ້ລິດບັງຄັບວ່າ "ເວທະນາຈົ່ງເປັນຂອງທ່ຽງ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານ ຈົ່ງເປັນຂອງທ່ຽງ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ພຽບພ້ອມດ້ວຍກຳລັງລິດ ເພິ່ງດຳລົງຢູ່ໄດ້ຕະຫຼອດກັບແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນໃຊ້ລິດບັງຄັບວ່າ "ສັດທັງຫຼາຍຜູ້ມີຄວາມເກີດເປັນທຳມະດາ ຢ່າໄດ້ເກີດເລີຍ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນໃຊ້ລິດບັງຄັບວ່າ "ສັດທັງຫຼາຍຜູ້ມີຄວາມແກ່ເປັນທຳມະດາ ຢ່າໄດ້ແກ່ເລີຍ ຯລຯ ສັດທັງຫຼາຍຜູ້ມີຄວາມເຈັບເປັນທຳມະດາ ຢ່າໄດ້ເຈັບເລີຍ ຯລຯ ສັດທັງຫຼາຍຜູ້ມີຄວາມຕາຍເປັນທຳມະດາ ຢ່າໄດ້ຕາຍເລີຍ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໖໔໕] ປຣ. ທ່ານບໍ່ຍອມຮັບວ່າ "ບຸກຄົນຜູ້ພຽບພ້ອມດ້ວຍກຳລັງລິດ ເພິ່ງດຳລົງຢູ່ໄດ້ຕະຫຼອດກັບ" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ອານົນ ອິດທິບາດ ໔ ອັນຜູ້ໃດຜູ້ໜຶ່ງໄດ້ຈະເລີນ ເຮັດໃຫ້ຫຼາຍ ເຮັດໃຫ້ເປັນເໝືອນຍານ ເຮັດໃຫ້ເປັນບ່ອນຕັ້ງ ໃຫ້ຕັ້ງໝັ້ນ ສັ່ງສົມ

ຜາຣິບດີແລ້ວ ຜູ້ນັ້ນເມື່ອມຸ້ງຫວັງ ເພິ່ງດຳລົງຢູ່ຕະຫຼອດ ໑ ກັບ ຫຼື ເກີນກວ່າ ໑ ກັບ" ມີຢູ່ຈິງ ບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ບຸກຄົນຜູ້ພຽບພ້ອມດ້ວຍກຳລັງລິດຈຶ່ງດຳລົງຢູ່ໄດ້ຕະຫຼອດກັບ

[໖໘໔] ສກ. ຜູ້ພຽບພ້ອມດ້ວຍກຳລັງລິດ ເພິ່ງດຳລົງຢູ່ໄດ້ຕະຫຼອດກັບແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ບໍ່ມີໃຜເລີຍ ບໍ່ວ່າຈະເປັນສະມະນະພາມ ເທວະດາ ມານ ພົມ ຫຼື ໃຜ ໆ ໃນໂລກທີ່ຈະປະກັນທຳ ໔ ປະການທຳ ໔ ປະການ ອັນໃດແດ່ ຄື

໑. ບໍ່ມີໃຜເລີຍ ບໍ່ວ່າຈະເປັນສະມະນະ ພາມ ເທວະດາ ມານ ພົມ ຫຼື ໃຜ ໆ ໃນໂລກທີ່ຈະປະກັນສິ່ງທີ່ມີຄວາມແກ່ເປັນທຳມະດາວ່າ ບໍ່ແກ່
໒. ບໍ່ມີໃຜເລີຍ ບໍ່ວ່າຈະເປັນສະມະນະ ພາມ ເທວະດາ ມານ ພົມ ຫຼື ໃຜ ໆ ໃນໂລກທີ່ຈະປະກັນສິ່ງທີ່ມີຄວາມເຈັບເປັນທຳມະດາວ່າ ບໍ່ເຈັບ
໓. ບໍ່ມີໃຜເລີຍ ບໍ່ວ່າຈະເປັນສະມະນະ ພາມ ເທວະດາ ມານ ພົມ ຫຼື ໃຜ ໆ ໃນໂລກທີ່ຈະປະກັນສິ່ງທີ່ມີຄວາມຕາຍເປັນທຳມະດາວ່າ ບໍ່ຕາຍ
໔. ບໍ່ມີໃຜເລີຍ ບໍ່ວ່າຈະເປັນສະມະນະ ພາມ ເທວະດາ ມານ ພົມ ຫຼື ໃຜ ໆ ໃນໂລກທີ່ຈະປະກັນຜົນແຫ່ງກຳຊົ່ວທີ່ເສົ້າໝອງ ໃຫ້ເກີດໃນພົບໃໝ່ ມີທຸກເປັນກຳໄລ ມີທຸກເປັນຜົນ ມີຊາດ ຊະຣາ ແລະມໍຣະນະຕໍ່ໄປວ່າ ບໍ່ບັງເກີດ ພິກຂຸທັງຫຼາຍ ບໍ່ມີໃຜເລີຍ ບໍ່ວ່າຈະເປັນສະມະນະ ພາມ ເທວະດາ ມານ ພົມ ຫຼື ໃຜ ໆ ໃນໂລກທີ່ຈະປະກັນທຳ ໔ ປະການນີ້ແລ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ຜູ້ພຽບພ້ອມດ້ວຍກຳລັງລິດເພິ່ງດຳລົງຢູ່ໄດ້ຕະຫຼອດກັບ"

**ອິດທິພະລະກະຖາ ຈົບ**

## ໗. ສະມາທິກະຖາ (໑໑໓)

## ວ່າດ້ວຍສະມາທິ

[໖໘໕] ສກ. ຄວາມສືບຕໍ່ແຫ່ງຈິດເປັນສະມາທິແມ່ນບໍ?

ປຣ. ແມ່ນ

ສກ. ຄວາມສືບຕໍ່ແຫ່ງຈິດທີ່ເປັນອະດີດເປັນສະມາທິແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມສືບຕໍ່ແຫ່ງຈິດເປັນສະມາທິແມ່ນບໍ?

ປຣ. ແມ່ນ

ສກ. ຄວາມສືບຕໍ່ແຫ່ງຈິດທີ່ເປັນອະນາຄົດເປັນສະມາທິແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມສືບຕໍ່ແຫ່ງຈິດເປັນສະມາທິແມ່ນບໍ?

ປຣ. ແມ່ນ

ສກ. ອະດີດດັບໄປແລ້ວ ອະນາຄົດກໍຍັງບໍ່ເກີດບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກອະດີດດັບໄປແລ້ວ ອະນາຄົດກໍຍັງບໍ່ເກີດ ທ່ານກໍບໍ່ຄວນຍອມຮັບວ່າ "ຄວາມສືບຕໍ່ແຫ່ງຈິດເປັນສະມາທິ"

[໖໔໖] ປຣ. ສະມາທິເປັນໄປຊົ່ວຂະນະຈິດດຽວແມ່ນບໍ?

ສກ. ແມ່ນ

ປຣ. ບຸກຄົນຜູ້ພຽບພ້ອມດ້ວຍຈັກຂຸວິນຍານເປັນຜູ້ເຂົ້າສະມາບັດແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ບຸກຄົນຜູ້ພຽບພ້ອມດ້ວຍໂສຕະວິນຍານ ຯລຯ ພຽບພ້ອມດ້ວຍຄານະວິນຍານ ຯລຯ ພຽບພ້ອມດ້ວຍຊິວຫາວິນຍານ ຯລຯ ພຽບພ້ອມດ້ວຍກາຍວິນຍານ ຯລຯ ພຽບພ້ອມດ້ວຍຈິດທີ່ເປັນອະກຸສົນ ຯລຯ ພຽບພ້ອມດ້ວຍຈິດທີ່ປະກອບດ້ວຍຣາຄະ ຯລຯ

ພຽບພ້ອມດ້ວຍຈິດທີ່ປະກອບດ້ວຍໂທສະ ຯລຯ ພຽບພ້ອມດ້ວຍຈິດທີ່ປະກອບດ້ວຍໂມຫະ ຯລຯ ພຽບພ້ອມດ້ວຍຈິດທີ່ປະກອບດ້ວຍອະໂນດຕັບປະ ເປັນຜູ້ເຂົ້າສະມາບັດແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມສືບຕໍ່ແຫ່ງຈິດເປັນສະມາທິແມ່ນບໍ?

ປຣ. ແມ່ນ

ສກ. ຄວາມສືບຕໍ່ແຫ່ງຈິດທີ່ເປັນອະກຸສົນເປັນສະມາທິແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມສືບຕໍ່ແຫ່ງຈິດທີ່ປະກອບດ້ວຍຣາຄະ ຯລຯ ທີ່ປະກອບດ້ວຍໂທສະ ຯລຯ ທີ່ປະກອບດ້ວຍໂມຫະ ຯລຯ ທີ່ປະກອບດ້ວຍອະໂນດຕັບປະ ເປັນສະມາທິແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ທ່ານບໍ່ຍອມຮັບວ່າ "ຄວາມສືບຕໍ່ແຫ່ງຈິດເປັນສະມາທິ" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ນີຄົນ ເຮົາບໍ່ເຄື່ອນໄຫວກາຍ ບໍ່ເວົ້າ ຯລຯ ສາມາດສະເຫວີຍສຸກໂດຍສ່ວນດຽວຕະຫຼອດ ໆ ຄືນ ໆ ວັນ" ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ຄວາມສືບຕໍ່ແຫ່ງຈິດຈຶ່ງເປັນສະມາທິ

**ສະມາທິກະຖາ ຈົບ**

# ໗. ທຳມັດຖິດຕາກະຖາ (໑໑໘)

## ວ່າດ້ວຍຄວາມຕັ້ງຢູ່ແຫ່ງສະພາວະທຳ

[໖໘໗] ສກ. ຄວາມຕັ້ງຢູ່ແຫ່ງສະພາວະທຳເປັນສະພາວະສຳເລັດແລ້ວ ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມຕັ້ງຢູ່ແຫ່ງຄວາມຕັ້ງຢູ່ແຫ່ງສະພາວະທຳນັ້ນ ເປັນສະພາວະສຳເລັດແລ້ວ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມຕັ້ງຢູ່ແຫ່ງຄວາມຕັ້ງຢູ່ແຫ່ງສະພາວະທຳນັ້ນ ເປັນສະພາວະສຳເລັດແລ້ວ ແມ່ນບໍ?

ປຣ. ແມ່ນ

ສກ. ການເຮັດບ່ອນສຸດແຫ່ງທຸກບໍ່ມີ ຄວາມຕັດຂາດວັດຕະບໍ່ມີ ອະນຸປາທາປະຣິນິບພານກໍບໍ່ມີ ແກ່ຄວາມຕັ້ງຢູ່ແຫ່ງຄວາມຕັ້ງຢູ່ແຫ່ງສະພາວະທຳທັງ ໔ ຊັ້ນດັ່ງກ່າວມານັ້ນ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມຕັ້ງຢູ່ແຫ່ງຮູບເປັນສະພາວະສຳເລັດແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ຄວາມຕັ້ງຢູ່ແຫ່ງຄວາມຕັ້ງຢູ່ແຫ່ງຮູບນັ້ນ ເປັນສະພາວະສຳເລັດແລ້ວແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມຕັ້ງຢູ່ແຫ່ງຄວາມຕັ້ງຢູ່ແຫ່ງຮູບນັ້ນ ເປັນສະພາວະສຳເລັດແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ການເຮັດບ່ອນສຸດແຫ່ງທຸກບໍ່ມີ ການຕັດຂາດວັດຕະບໍ່ມີ ອະນຸປາທາປະຣິນິບພານກໍບໍ່ມີແກ່ຄວາມຕັ້ງຢູ່ແຫ່ງຄວາມຕັ້ງຢູ່ແຫ່ງຮູບທັງ ໔ ຊັ້ນດັ່ງກ່າວມານັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມຕັ້ງຢູ່ແຫ່ງເວທະນາ ຯລຯ ຄວາມຕັ້ງຢູ່ແຫ່ງສັນຍາ ຯລຯ ຄວາມຕັ້ງຢູ່ແຫ່ງສັງຂານ ຯລຯ ຄວາມຕັ້ງຢູ່ແຫ່ງວິນຍານ ເປັນສະພາວະສຳເລັດແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ຄວາມຕັ້ງຢູ່ແຫ່ງຄວາມຕັ້ງຢູ່ແຫ່ງວິນຍານນັ້ນເປັນສະພາວະສຳເລັດແລ້ວແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມຕັ້ງຢູ່ແຫ່ງຄວາມຕັ້ງຢູ່ແຫ່ງວິນຍານນັ້ນເປັນສະພາວະສຳເລັດແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ການເຮັດບ່ອນສຸດທຸກບໍ່ມີ ການຕັດຂາດວັດຕະບໍ່ມີ ອະນຸປາທາປະຣິນິບພານກໍບໍ່ມີແກ່ຄວາມຕັ້ງຢູ່ແຫ່ງຄວາມຕັ້ງຢູ່ແຫ່ງວິນຍານທັງ ໔ ຊັ້ນດັ່ງກ່າວມານັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

**ທໍາມັດຖິດຕາກະຖາ ຈົບ**

## ໑໐. ອະນິດຈະຕາກະຖາ (໑໑໕)

## ວ່າດ້ວຍຄວາມບໍ່ທ່ຽງ

[໖໔໗] ສກ. ຄວາມບໍ່ທ່ຽງເປັນສະພາວະສຳເລັດແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ຄວາມບໍ່ທ່ຽງແຫ່ງຄວາມບໍ່ທ່ຽງນັ້ນ ເປັນສະພາວະສຳເລັດແລ້ວແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມບໍ່ທ່ຽງແຫ່ງຄວາມບໍ່ທ່ຽງນັ້ນເປັນສະພາວະສຳເລັດແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ການເຮັດບ່ອນສຸດແຫ່ງທຸກບໍ່ມີ ການຕັດຂາດວັດຕະບໍ່ມີ ອະນຸປາທາປະຣິນິບພານກໍບໍ່ມີ ແກ່ຄວາມບໍ່ທ່ຽງແຫ່ງຄວາມບໍ່ທ່ຽງທັງ ໔ ຊັ້ນດັ່ງກ່າວມານັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມແກ່ເປັນສະພາວະສຳເລັດແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ຄວາມແກ່ແຫ່ງຄວາມແກ່ນັ້ນ ເປັນສະພາວະສຳເລັດແລ້ວແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມແກ່ແຫ່ງຄວາມແກ່ນັ້ນ ເປັນສະພາວະສຳເລັດແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ການເຮັດບ່ອນສຸດແຫ່ງທຸກບໍ່ມີ ການຕັດຂາດວັດຕະບໍ່ມີ ອະນຸປາທາປະຣິນິບພານກໍບໍ່ມີແກ່ຄວາມແກ່ແຫ່ງຄວາມແກ່ທັງ ໘ ຊັ້ນດັ່ງກ່າວມານັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມຕາຍເປັນສະພາວະສຳເລັດແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ຄວາມຕາຍແຫ່ງຄວາມຕາຍນັ້ນເປັນສະພາວະສຳເລັດແລ້ວແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມຕາຍແຫ່ງຄວາມຕາຍນັ້ນເປັນສະພາວະສຳເລັດແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ການເຮັດບ່ອນສຸດແຫ່ງທຸກບໍ່ມີ ການຕັດຂາດວັດຕະບໍ່ມີ ອະນຸປາທາປະຣິນິບພານກໍບໍ່ມີແກ່ຄວາມຕາຍແຫ່ງຄວາມຕາຍທັງ ໘ ຊັ້ນດັ່ງກ່າວມາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໖໘໙] ສກ. ຮູບເປັນສະພາວະສຳເລັດແລ້ວ ແຕ່ຄວາມບໍ່ທ່ຽງແຫ່ງຮູບມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມບໍ່ທ່ຽງເປັນສະພາວະສຳເລັດແລ້ວ ແຕ່ຄວາມບໍ່ທ່ຽງແຫ່ງຄວາມບໍ່ທ່ຽງມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບເປັນສະພາວະສຳເລັດແລ້ວ ແຕ່ຄວາມແກ່ແຫ່ງຮູບມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມແກ່ເປັນສະພາວະສຳເລັດແລ້ວ ແຕ່ຄວາມແກ່ແຫ່ງຄວາມແກ່ມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບເປັນສະພາວະສຳເລັດແລ້ວ ແຕ່ຄວາມແຕກສະຫຼາຍ ຄວາມສູນຫາຍໄປແຫ່ງຮູບ ມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມຕາຍເປັນສະພາວະສຳເລັດແລ້ວ ແຕ່ຄວາມແຕກສະຫຼາຍ ຄວາມສູນຫາຍໄປແຫ່ງຄວາມຕາຍມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານ ເປັນສະພາວະສຳເລັດແລ້ວ ແຕ່ຄວາມບໍ່ທ່ຽງແຫ່ງວິນຍານມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມບໍ່ທ່ຽງເປັນສະພາວະສຳເລັດແລ້ວ ແຕ່ຄວາມບໍ່ທ່ຽງແຫ່ງຄວາມບໍ່ທ່ຽງມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວິນຍານເປັນສະພາວະສຳເລັດແລ້ວ ແຕ່ຄວາມແກ່ແຫ່ງວິນຍານມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມແກ່ເປັນສະພາວະສຳເລັດແລ້ວ ແຕ່ຄວາມແກ່ແຫ່ງຄວາມແກ່ມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວິນຍານເປັນສະພາວະສຳເລັດແລ້ວ ແຕ່ຄວາມແຕກສະຫຼາຍ ຄວາມສູນຫາຍໄປແຫ່ງວິນຍານມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມຕາຍເປັນສະພາວະສຳເລັດແລ້ວ ແຕ່ຄວາມແຕກສະຫຼາຍ ຄວາມສູນຫາຍໄປແຫ່ງຄວາມຕາຍມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

**ອະນິດຈະຕາກະຖາ ຈົບ**

**ເອກາທະສະມະວັກ ຈົບ**

## ລວມກະຖາທີ່ມີໃນວັກນີ້ ຄື

| | |
|---|---|
| ໑-໓. ຕິດໂສປິອະນຸສະຍະກະຖາ | ໔. ຍານະກະຖາ |
| ໕. ຍານັງຈິດຕະວິບປະຍຸດຕັນຕິກະຖາ | ໖. ອິທັງທຸກຂັນຕິກະຖາ |
| ໗. ອິດທິພະລະກະຖາ | ໘. ສະມາທິກະຖາ |
| ໙. ທຳມັດຖິດຕາກະຖາ | ໑໐. ອະນິດຈະຕາກະຖາ |

# ໑໘. ທະວາທະສະມະວັກ

## ໑. ສັງວະໂຣກຳມັນຕິກະຖາ (໑໑໖)

### ວ່າດ້ວຍຄວາມສັງລວມເປັນກຳ

[໖໙໐] ສກ. ຄວາມສັງລວມເປັນກຳແມ່ນບໍ?

ປຣ. ແມ່ນ

ສກ. ຄວາມສັງລວມຈັກຂຸນຊີເປັນຈັກຂຸກຳແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມສັງລວມໂສຕິນຊີ ຯລຯ ຄວາມສັງລວມຄານິນຊີ ຯລຯ ຄວາມສັງລວມຊິວຫິນຊີ ຯລຯ ຄວາມສັງລວມກາຍິນຊີ ເປັນກາຍຍະກຳແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມສັງລວມກາຍິນຊີເປັນກາຍຍະກຳແມ່ນບໍ?

ປຣ. ແມ່ນ

ສກ. ຄວາມສັງລວມຈັກຂຸນຊີເປັນຈັກຂຸກຳແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມສັງລວມກາຍິນຊີເປັນກາຍຍະກຳແມ່ນບໍ?

ປຣ. ແມ່ນ

ສກ. ຄວາມສັງລວມໂສຕິນຊີ ຯລຯ ຄວາມສັງລວມຄານິນຊີ ຯລຯ ຄວາມສັງລວມຊິວຫິນຊີ ເປັນຊິວຫາກຳແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມສັງລວມມະນິນຊີເປັນມະໂນກຳແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມສັງລວມມະນິນຊີເປັນມະໂນກຳແມ່ນບໍ?

ປຣ. ແມ່ນ

ສກ. ຄວາມສັງລວມຈັກຂຸນຊີເປັນຈັກຂຸກຳແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມສັງລວມມະນິນຊີເປັນມະໂນກຳແມ່ນບໍ?

ປຣ. ແມ່ນ

ສກ. ຄວາມສັງລວມໂສຕິນຊີ ຯລຯ ຄວາມສັງລວມຄານິນຊີ ຯລຯ ຄວາມສັງລວມຊິວຫິນຊີ ຯລຯ ຄວາມສັງລວມກາຍິນຊີ ເປັນກາຍຍະກຳແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໖໓໑] ສກ. ຄວາມບໍ່ສັງລວມເປັນກຳແມ່ນບໍ?

ປຣ. ແມ່ນ

ສກ. ຄວາມບໍ່ສັງລວມຈັກຂຸນຊີເປັນຈັກຂຸກຳແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມບໍ່ສັງລວມໂສຕິນຊີ ຯລຯ ຄວາມບໍ່ສັງລວມຄານິນຊີ ຯລຯ ຄວາມບໍ່ສັງລວມຊິວຫິນຊີ ຯລຯ ຄວາມບໍ່ສັງລວມກາຍິນຊີ ເປັນກາຍຍະກຳແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມບໍ່ສັງລວມກາຍິນຊີເປັນກາຍຍະກຳແມ່ນບໍ?

ປຣ. ແມ່ນ

ສກ. ຄວາມບໍ່ສັງລວມຈັກຂຸນຊີເປັນຈັກຂຸກຳແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມບໍ່ສັງລວມກາຍິນຊີເປັນກາຍຍະກຳແມ່ນບໍ?

ປຣ. ແມ່ນ

ສກ. ຄວາມບໍ່ສັງລວມໂສຕິນຊີ ຯລຯ ຄວາມບໍ່ສັງລວມຄານິນຊີ ຯລຯ ຄວາມບໍ່ສັງລວມຊິວຫິນຊີ ເປັນຊິວຫາກຳແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມບໍ່ສັງລວມມະນິນຊີເປັນມະໂນກຳແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມບໍ່ສັງລວມມະນິນຊີເປັນມະໂນກຳແມ່ນບໍ?

ປຣ. ແມ່ນ

ສກ. ຄວາມບໍ່ສັງລວມຈັກຂຸນຊີເປັນຈັກຂຸກຳແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມບໍ່ສັງລວມມະນິນຊີເປັນມະໂນກຳແມ່ນບໍ?

ປຣ. ແມ່ນ

ສກ. ຄວາມບໍ່ສັງລວມໂສຕິນຊີ ຯລຯ ຄວາມບໍ່ສັງລວມຄານິນຊີ ຯລຯ ຄວາມບໍ່ສັງລວມຊິວຫິນຊີ ຯລຯ ຄວາມບໍ່ສັງລວມກາຍິນຊີ ເປັນກາຍຍະກຳແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໖໓໘] ປຣ. ທ່ານບໍ່ຍອມຮັບວ່າ "ຄວາມສັງລວມກໍດີ ຄວາມບໍ່ສັງລວມກໍດີ ເປັນກຳ" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ພິກຂຸໃນທຳວິໄນນີ້

ເຫັນຮູບທາງຕາແລ້ວເປັນຜູ້ລອມຖື ຯລຯ ບໍ່ເປັນຜູ້ລອມຖື ຟັງສຽງທາງຫູ ຯລຯ ຮູ້ທຳມາຣົມທາງໃຈແລ້ວເປັນຜູ້ລອມຖື ຯລຯ ບໍ່ເປັນຜູ້ລອມຖື" ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ຄວາມສັງລອມກໍດີ ຄວາມບໍ່ສັງລອມກໍດີຈຶ່ງເປັນກຳ

**ສັງວະໂຣກຳມັນຕິກະຖາ ຈົບ**

## ໘. ກຳມະກະຖາ (໑໑ກ)

## ວ່າດ້ວຍກຳ

[໖໖໖] ສກ. ກຳທັງປວງມີວິບາກແມ່ນບໍ?

ປຣ. ແມ່ນ

ສກ. ເຈຕະນາທັງປວງມີວິບາກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເຈຕະນາທັງປວງມີວິບາກແມ່ນບໍ?

ປຣ. ແມ່ນ

ສກ. ເຈຕະນາທີ່ເປັນອັບພະຍາກະຕະຝ່າຍວິບາກມີວິບາກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເຈຕະນາທັງປວງມີວິບາກແມ່ນບໍ?

ປຣ. ແມ່ນ

ສກ. ເຈຕະນາທີ່ເປັນອັບພະຍາກະຕະຝ່າຍກິຣິຍາມີວິບາກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເຈຕະນາທັງປວງມີວິບາກແມ່ນບໍ?

ປຣ. ແມ່ນ

ສກ. ເຈຕະນາທີ່ເປັນອັບພະຍາກະຕະຝ່າຍວິບາກ ທີ່ເປັນກາມາວະຈອນມີວິບາກ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເຈຕະນາທັງປວງມີວິບາກແມ່ນບໍ?

ປຣ. ແມ່ນ

ສກ. ເຈຕະນາທີ່ເປັນອັບພະຍາກະຕະຝ່າຍວິບາກທີ່ເປັນຮູບປາວະຈອນ ທີ່ເປັນອະຮູບປາວະຈອນທີ່ເປັນໂລກຸດຕະຣະມີວິບາກ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເຈຕະນາທັງປວງມີວິບາກແມ່ນບໍ?

ປຣ. ແມ່ນ

ສກ. ເຈຕະນາທີ່ເປັນອັບພະຍາກະຕະຝ່າຍກິຣິຍາ ທີ່ເປັນກາມາວະຈອນມີວິບາກ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເຈຕະນາທັງປວງມີວິບາກແມ່ນບໍ?

ປຣ. ແມ່ນ

ສກ. ເຈຕະນາທີ່ເປັນອັບພະຍາກະຕະຝ່າຍກິຣິຍາທີ່ເປັນຣູບປາວະຈອນ ທີ່ເປັນອະຣູບປາວະຈອນມີວິບາກ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໖໓໔] ສກ. ເຈຕະນາທີ່ເປັນອັບພະຍາກະຕະຝ່າຍວິບາກບໍ່ມີວິບາກແມ່ນບໍ?

ປຣ. ແມ່ນ

ສກ. ຫາກເຈຕະນາທີ່ເປັນອັບພະຍາກະຕະຝ່າຍວິບາກບໍ່ມີວິບາກ ທ່ານກໍບໍ່ຄວນຍອມຮັບວ່າ "ເຈຕະນາທັງປວງມີວິບາກ"

ສກ. ເຈຕະນາທີ່ເປັນອັບພະຍາກະຕະຝ່າຍກິຣິຍາບໍ່ມີວິບາກແມ່ນບໍ?

ປຣ. ແມ່ນ

ສກ. ຫາກເຈຕະນາທີ່ເປັນອັບພະຍາກະຕະຝ່າຍກິຣິຍາບໍ່ມີວິບາກ ທ່ານກໍບໍ່ຄວນຍອມຮັບວ່າ "ເຈຕະນາທັງປວງມີວິບາກ"

ສກ. ເຈຕະນາທີ່ເປັນອັບພະຍາກະຕະຝ່າຍວິບາກ ທີ່ເປັນກາມາວະຈອນ ທີ່ເປັນຣູບປາວະຈອນ ທີ່ເປັນອະຣູບປາວະຈອນ ທີ່ເປັນໂລກຸດຕະຣະ ບໍ່ມີວິບາກແມ່ນບໍ?

ປຣ. ແມ່ນ

ສກ. ຫາກເຈຕະນາທີ່ເປັນອັບພະຍາກະຕະຝ່າຍວິບາກ ທີ່ເປັນໂລກຸດຕະຣະ ບໍ່ມີວິບາກ ທ່ານກໍບໍ່ຄວນຍອມຮັບວ່າ "ເຈຕະນາທັງປວງມີວິບາກ"

ສກ. ເຈຕະນາທີ່ເປັນອັບພະຍາກະຕະຝ່າຍກິຣິຍາທີ່ເປັນກາມາວະຈອນ ທີ່ເປັນຣູບປາວະຈອນ ທີ່ເປັນອະຣູບປາວະຈອນ ບໍ່ມີວິບາກແມ່ນບໍ?

ປຣ. ແມ່ນ

ສກ. ຫາກເຈຕະນາທີ່ເປັນອັບພະຍາກະຕະຝ່າຍກິຣິຍາ ທີ່ເປັນອະຣູບປາວະຈອນ ບໍ່ມີວິບາກ ທ່ານກໍບໍ່ຄວນຍອມຮັບວ່າ "ເຈຕະນາທັງປວງມີວິບາກ"

[໖໓໕] ປຣ. ທ່ານບໍ່ຍອມຮັບວ່າ "ກຳທັງປວງມີວິບາກ" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ເຮົາບໍ່ກ່າວກຳທີ່ສັດມີເຈຕະນາເຮັດໄວ້ ສັ່ງສົມໄວ້ວ່າ ສິ້ນສຸດ ຍ້ອນຍັງບໍ່ສະເຫວີຍຜົນ ກໍຜົນນັ້ນແລສັດຕ້ອງສະເຫວີຍ

ໃນອັດຕະພາບນີ້ ໃນອັດຕະພາບຖັດໄປຫຼືໃນອັດຕະພາບຕໍ່ ໆ ໄປ" ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ກໍາທັງປວງຈຶ່ງມີວິບາກ

**ກໍາມະກະຖາ ຈົບ**

# ໓. ສັດໂທວິປາໂກຕິກະຖາ (໑໑໘)

## ວ່າດ້ວຍສຽງເປັນວິບາກ

[໓໓໓] ສກ. ສຽງເປັນວິບາກແມ່ນບໍ?

ປຣ. ແມ່ນ

ສກ. ສຽງມີສຸກຂະເວທະນາ ມີທຸກຂະເວທະນາ ມີອະທຸກຂະມະສຸຂະເວທະນາ ສໍາປະຍຸດດ້ວຍສຸກຂະເວທະນາ ສໍາປະຍຸດດ້ວຍທຸກຂະເວທະນາ ສໍາປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ສໍາປະຍຸດດ້ວຍຜັດສະ ສໍາປະຍຸດດ້ວຍເວທະນາ ສໍາປະຍຸດດ້ວຍສັນຍາ ສໍາປະຍຸດດ້ວຍເຈຕະນາ ສໍາປະຍຸດດ້ວຍຈິດ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ມີຄວາມຜູກໃຈ ມີຄວາມສົນໃຈ ມີຄວາມໃຝ່ໃຈ ມີຄວາມຈົງໃຈ ມີຄວາມປາຖະໜາ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ສຽງບໍ່ມີສຸກຂະເວທະນາ ບໍ່ມີທຸກຂະເວທະນາ ฯລฯ ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ฯລฯ ບໍ່ມີຄວາມຕັ້ງໃຈບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກສຽງບໍ່ມີສຸກຂະເວທະນາ ฯລฯ ຮັບຮູ້ອາລົມບໍ່ໄດ້ ฯລฯ ບໍ່ມີຄວາມນຶກເຖິງ ฯລฯ ບໍ່ມີຄວາມຕັ້ງໃຈ ທ່ານກໍບໍ່ຄວນຍອມຮັບວ່າ "ສຽງເປັນວິບາກ"

ສກ. ຜັດສະເປັນວິບາກ ມີສຸກຂະເວທະນາ ฯລฯ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ฯລฯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ສຽງເປັນວິບາກ ມີສຸກຂະເວທະນາ ฯລฯ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ฯລฯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ສຽງເປັນວິບາກ ບໍ່ມີສຸກຂະເວທະນາ ฯລฯ ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ฯລฯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ຜັດສະເປັນວິບາກ ບໍ່ມີສຸກຂະເວທະນາ ບໍ່ມີທຸກຂະເວທະນາ ຯລຯ ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໖໖໗] ປຣ. ທ່ານບໍ່ຍອມຮັບວ່າ "ສຽງເປັນວິບາກ" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ຍ້ອນຕະຖາຄົດ ໄດ້ເຮັດ ສັ່ງສົມ ພອກພູນ ເພີ່ມພູນກໍານັ້ນ ຕະຖາຄົດນັ້ນ ຈຶ່ງມີພຣະສຸຣະສຽງເໝືອນສຽງ ພົມຕັດເໝືອນສຽງຮ້ອງຂອງນົກກາຣະເວກ" ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ສຽງຈຶ່ງເປັນວິບາກ

**ສັດໂທວິປາໂກຕິກະຖາ ຈົບ**

## ໔. ສະລາຍະຕະນະກະຖາ (໑໑໗)

### ວ່າດ້ວຍອາຍະຕະນະ ໖

[໖໖໘] ສກ. ຈັກຂາຍະຕະນະເປັນວິບາກແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂາຍະຕະນະມີສຸກຂະເວທະນາ ມີທຸກຂະເວທະນາ ຯລຯ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈັກຂາຍະຕະນະບໍ່ມີສຸກຂະເວທະນາ ຯລຯ ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຈັກຂາຍະຕະນະບໍ່ມີສຸກຂະເວທະນາ ຯລຯ ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈ ທ່ານກໍບໍ່ຄວນຍອມຮັບວ່າ "ຈັກຂາຍະຕະນະເປັນວິບາກ" ຯລຯ

ສກ. ຜັດສະເປັນວິບາກ ມີສຸກຂະເວທະນາ ຯລຯ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂາຍະຕະນະເປັນວິບາກ ມີສຸກຂະເວທະນາ ຯລຯ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈັກຂາຍະຕະນະເປັນວິບາກ ແຕ່ບໍ່ມີສຸກຂະເວທະນາ ຯລຯ ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ຜັດສະເປັນວິບາກ ແຕ່ບໍ່ມີສຸກຂະເວທະນາ ຯລຯ ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໖໖໗] ສກ. ໂສຕາຍະຕະນະ ຯລຯ ຄານາຍະຕະນະ ຯລຯ ຊິວຫາຍະຕະນະ ຯລຯ ກາຍາຍະຕະນະ ເປັນວິບາກແມ່ນບໍ?

ປຣ. ແມ່ນ

ສກ. ກາຍາຍະຕະນະມີສຸກຂະເວທະນາ ຯລຯ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກາຍາຍະຕະນະບໍ່ມີສຸກຂະເວທະນາ ຯລຯ ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ຫາກກາຍາຍະຕະນະບໍ່ມີສຸກຂະເວທະນາ ຯລຯ ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈ ທ່ານກໍບໍ່ຄວນຍອມຮັບວ່າ “ກາຍາຍະຕະນະເປັນວິບາກ” ຯລຯ

ສກ. ຜັດສະເປັນວິບາກ ມີສຸກຂະເວທະນາ ຯລຯ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ກາຍາຍະຕະນະເປັນວິບາກ ມີສຸກຂະເວທະນາ ຯລຯ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກາຍາຍະຕະນະເປັນວິບາກ ແຕ່ບໍ່ມີສຸກຂະເວທະນາ ຯລຯ ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ຜັດສະເປັນວິບາກ ແຕ່ບໍ່ມີສຸກຂະເວທະນາ ຯລຯ ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໔໐] ປຣ. ທ່ານບໍ່ຍອມຮັບວ່າ "ອາຍະຕະນະ ໖ ເປັນວິບາກ" ແມ່ນບໍ?

ສກ. ແມ່ນ

ປຣ. ອາຍະຕະນະ ໖ ຊື່ວ່າ ເກີດຂຶ້ນຍ້ອນໄດ້ມີການເຮັດກຳໄວ້ບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກອາຍະຕະນະ ໖ ຊື່ວ່າເກີດຂຶ້ນຍ້ອນໄດ້ມີການເຮັດກຳໄວ້ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ອາຍະຕະນະ ໖ ເປັນວິບາກ"

**ສະລາຍະຕະນະກະຖາ ຈົບ**

# ໕. ສັດຕັກຂັດຕຸປະຣະມະກະຖາ (໑໔໐)

## ວ່າດ້ວຍບຸກຄົນຜູ້ສັດຕັກຂັດຕຸປະຣະມະ

[໗໔໑] ສກ. ບຸກຄົນຜູ້ສັດຕັກຂັດຕຸປະຣະມະ ເປັນຜູ້ແນ່ນອນທີ່ຈະເກີດອີກ ໗ ຄັ້ງເປັນຢ່າງຍິ່ງແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ສັດຕັກຂັດຕຸປະຣະມະ ປົງຊີວິດມານດາ ປົງຊີວິດບິດາ ປົງຊີວິດພຣະອະຣະຫັນ ມີຈິດຄິດປະທຸດສະຮ້າຍທຳຮ້າຍພຣະພຸດທະເຈົ້າຈົນພຣະໂລຫິດຫໍ້ ທຳລາຍສົງໃຫ້ແຕກກັນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ສັດຕັກຂັດຕຸປະຣະມະເປັນຜູ້ແນ່ນອນທີ່ຈະເກີດອີກ ໗ ຄັ້ງເປັນຢ່າງຍິ່ງແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ສັດຕັກຂັດຕຸປະຣະມະນັ້ນ ເປັນຜູ້ບໍ່ຄວນທີ່ຈະໄດ້ບັນລຸທຳໃນລະຫວ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ສັດຕັກຂັດຕຸປະຣະມະເປັນຜູ້ບໍ່ຄວນທີ່ຈະໄດ້ບັນລຸທຳໃນລະຫວ່າງແມ່ນບໍ?

ປຣ. ແມ່ນ

ສກ. ເຂົາປົງຊີວິດມານດາ ປົງຊີວິດບິດາ ປົງຊີວິດພຣະອະຣະຫັນ ມີຈິດຄິດປະທຸດສະຮ້າຍທຳຮ້າຍພຣະພຸດທະເຈົ້າຈົນພຣະໂລຫິດຫໍ້ ທຳລາຍສົງໃຫ້ແຕກກັນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໔໘] ສກ. ບຸກຄົນຜູ້ສັດຕັກຂັດຕຸປະຣະມະເປັນຜູ້ແນ່ນອນທີ່ຈະເກີດອີກ ໆ ຄັ້ງເປັນຢ່າງຍິ່ງແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ສັດຕັກຂັດຕຸປະຣະມະເປັນຜູ້ແນ່ນອນທີ່ຈະເກີດອີກ ໆ ຄັ້ງເປັນຢ່າງຍິ່ງດ້ວຍມັກອັນແນ່ນອນໃດ ມັກອັນແນ່ນອນນັ້ນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ສັດຕັກຂັດຕຸປະຣະມະເປັນຜູ້ແນ່ນອນທີ່ຈະເກີດ ໆ ຄັ້ງເປັນຢ່າງຍິ່ງ ດ້ວຍສະຕິປັດຖານ ສຳມັບປະທານ ອິດທິບາດ ອິນຊີ ພະລະ ໂພດຊົງເຫຼົ່າໃດ ສະຕິປັດຖານ ສຳມັບປະທານ ອິດທິບາດ ອິນຊີ ພະລະ ໂພດຊົງເຫຼົ່ານັ້ນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໔໙] ສກ. ບຸກຄົນຜູ້ສັດຕັກຂັດຕຸປະຣະມະເປັນຜູ້ແນ່ນອນທີ່ຈະເກີດອີກ ໆ ຄັ້ງເປັນຢ່າງຍິ່ງ ດ້ວຍມັກອັນແນ່ນອນໃດ ມັກອັນແນ່ນອນນັ້ນບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນຜູ້ສັດຕັກຂັດຕຸປະຣະມະເປັນຜູ້ແນ່ນອນທີ່ຈະເກີດອີກ ໆ ຄັ້ງເປັນຢ່າງຍິ່ງ ດ້ວຍມັກອັນແນ່ນອນໃດ ມັກອັນແນ່ນອນນັ້ນບໍ່ມີ ທ່ານກໍບໍ່ຄວນຍອມຮັບວ່າ "ບຸກຄົນຜູ້ສັດຕັກຂັດຕຸປະຣະມະເປັນຜູ້ແນ່ນອນທີ່ຈະເກີດອີກ ໆ ຄັ້ງເປັນຢ່າງຍິ່ງ"

ສກ. ບຸກຄົນຜູ້ສັດຕັກຂັດຕຸປະຣະມະເປັນຜູ້ແນ່ນອນທີ່ຈະເກີດອີກ ໆ ຄັ້ງເປັນຢ່າງຍິ່ງດ້ວຍສະຕິປັດຖານ ຯລຯ ໂພດຊົງເຫຼົ່າໃດ ສະຕິປັດຖານ ຯລຯ ໂພດຊົງເຫຼົ່ານັ້ນ ບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນຜູ້ສັດຕັກຂັດຕຸປະຣະມະເປັນຜູ້ແນ່ນອນທີ່ຈະເກີດອີກ ໆ ຄັ້ງເປັນຢ່າງຍິ່ງ ດ້ວຍໂພດຊົງເຫຼົ່າໃດ ໂພດຊົງເຫຼົ່ານັ້ນບໍ່ມີ ທ່ານກໍບໍ່ຄວນຍອມຮັບວ່າ "ບຸກຄົນຜູ້ສັດຕັກຂັດຕຸປະຣະມະເປັນຜູ້ແນ່ນອນທີ່ຈະເກີດອີກ ໆ ຄັ້ງເປັນຢ່າງຍິ່ງ"

[໗໕໐] ສກ. ບຸກຄົນຜູ້ສັດຕັກຂັດຕຸປະຣະມະເປັນຜູ້ແນ່ນອນທີ່ຈະເກີດອີກ ໆ ຄັ້ງເປັນຢ່າງຍິ່ງແມ່ນບໍ?

ປຣ. ແມ່ນ

ສກ. ດ້ວຍການກຳນົດແນ່ນອນ ຄື ສະກະທາຄາມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ດ້ວຍການກຳນົດແນ່ນອນ ຄື ອະນາກາມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ດ້ວຍການກຳນົດແນ່ນອນ ຄື ອະຣະຫັດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ດ້ວຍການກຳນົດແນ່ນອນອັນໃດ?

ປຣ. ດ້ວຍການກຳນົດແນ່ນອນ ຄື ໂສດາປັດຕິຜົນ

ສກ. ບຸກຄົນຜູ້ສັດຕັກຂັດຕຸປະຣະມະເປັນຜູ້ແນ່ນອນທີ່ຈະເກີດ ໗ ຄັ້ງເປັນຢ່າງຍິ່ງ ແມ່ນບໍ?

ປຣ. ແມ່ນ

ສກ. ເຫຼົ່າຊົນທີ່ກ້າວລົງສູ່ໂສດາປັດຕິນິຍາມ ທັງໝົດນັ້ນເປັນຜູ້ແນ່ນອນທີ່ຈະເກີດອີກ ໗ ຄັ້ງເປັນຢ່າງຍິ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໖໔໕] ປຣ. ທ່ານບໍ່ຍອມຮັບວ່າ "ບຸກຄົນຜູ້ສັດຕັກຂັດຕຸປະຣະມະເປັນຜູ້ແນ່ນອນທີ່ຈະເກີດອີກ ໗ ຄັ້ງເປັນຢ່າງຍິ່ງ" ແມ່ນບໍ?

ສກ. ແມ່ນ

ປຣ. ບຸກຄົນນັ້ນເປັນສັດຕັກຂັດຕຸປະຣະມະບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກບຸກຄົນນັ້ນເປັນສັດຕັກຂັດຕຸປະຣະມະ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ບຸກຄົນຜູ້ສັດຕັກຂັດຕຸປະຣະມະເປັນຜູ້ແນ່ນອນທີ່ຈະເກີດອີກ ໗ ຄັ້ງເປັນຢ່າງຍິ່ງ"

**ສັດຕັກຂັດຕຸປະຣະມະກະຖາ ຈົບ**

# ໖. ໂກລັງໂກລະກະຖາ (໑໔໑)

## ວ່າດ້ວຍບຸກຄົນຜູ້ໂກລັງໂກລະ

[໖໔໖] ປຣ.໑ ທ່ານບໍ່ຍອມຮັບວ່າ "ບຸກຄົນຜູ້ໂກລັງໂກລະ ເປັນຜູ້ແນ່ນອນທີ່ຈະເກີດອີກ ໔-໓ ຄັ້ງ" ແມ່ນບໍ?

ສກ. ແມ່ນ

ປຣ. ຜູ້ນັ້ນເປັນໂກລັງໂກລະບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກຜູ້ນັ້ນເປັນໂກລັງໂກລະ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ບຸກຄົນຜູ້ໂກລັງໂກລະເປັນຜູ້ແນ່ນອນທີ່ຈະເກີດອີກ ໔-໓ ຄັ້ງ"

**ໂກລັງໂກລະກະຖາ ຈົບ**

# ໗. ເອກະພີຊີກະຖາ (໑໘໘)

## ວ່າດ້ວຍບຸກຄົນຜູ້ເອກະພີຊີ

[໕໘໗] ປຣ. ທ່ານບໍ່ຍອມຮັບວ່າ "ບຸກຄົນຜູ້ເອກະພີຊີ ເປັນຜູ້ແນ່ນອນທີ່ຈະເກີດອີກຄັ້ງດຽວ" ແມ່ນບໍ?

ສກ. ແມ່ນ

ປຣ. ຜູ້ນັ້ນເປັນເອກະພີຊີບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກຜູ້ນັ້ນເປັນເອກະພີຊີ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ບຸກຄົນຜູ້ເອກະພີຊີເປັນຜູ້ແນ່ນອນທີ່ຈະເກີດອີກຄັ້ງດຽວ"

**ເອກະພີຊີກະຖາ ຈົບ**

# ໘. ຊີວິຕາໂວໂຣປະນະກະຖາ (໑໘໙)

## ວ່າດ້ວຍການປົງຊີວິດ

[໕໘໘] ສກ. ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິອາດຈະຈົງໃຈປົງຊີວິດສັດໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິ ອາດຈະຈົງໃຈປົງຊີວິດມານດາ ຯລຯ ປົງຊີວິດບິດາ ປົງຊີວິດພຣະອະຣະຫັນ ມີຈິດຄິດປະທຸດສະຮ້າຍທຳຮ້າຍພຣະພຸດທະເຈົ້າຈົນພຣະໂລຫິດຫໍ້ ຯລຯ ທຳລາຍສົງໃຫ້ແຕກກັນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິອາດຈະຈົງໃຈປົງຊີວິດສັດໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິເປັນຜູ້ບໍ່ມີຄວາມເຄົາລົບໃນພຣະສາດສະດາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິເປັນຜູ້ບໍ່ມີຄວາມເຄົາລົບໃນພຣະທຳ ຯລຯ ໃນພຣະສົງ ຯລຯ ໃນສິກຂາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິເປັນຜູ້ມີຄວາມເຄົາລົບໃນພຣະສາດສະດາບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນຜູ້ເຖິງພ້ອມດ້ວຍທິດຖິເປັນຜູ້ມີຄວາມເຄົາລົບໃນພຣະສາດສະດາ ທ່ານກໍບໍ່ຄວນຍອມຮັບວ່າ "ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິອາດຈະຈົງໃຈປົງຊີວິດສັດໄດ້" ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິເປັນຜູ້ມີຄວາມເຄົາລົບໃນພຣະທຳ ຯລຯ ໃນພຣະສົງ ຯລຯ ໃນສິກຂາບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນຜູ້ເຖິງພ້ອມດ້ວຍທິດຖິເປັນຜູ້ມີຄວາມເຄົາລົບໃນສິກຂາ ທ່ານກໍບໍ່ຄວນຍອມຮັບວ່າ "ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິອາດຈະຈົງໃຈປົງຊີວິດສັດໄດ້"

[໖໘໙] ສກ. ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິ ເປັນຜູ້ບໍ່ມີຄວາມເຄົາລົບໃນພຣະສາດສະດາ ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິອາດຈະຖ່າຍອຸດຈາຣະ ຖ່າຍປັດສາວະທົດ ແລະຖົ່ມນ້ຳລາຍ ລົງໃສ່ພຣະພຸດທະສະຖູບ ເຮັດພຣະພຸດທະສະຖູບໄວ້ທາງເບື້ອງຊ້າຍແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິອາດຈະຈົງໃຈປົງຊີວິດສັດໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ສາວົກທັງຫຼາຍຂອງເຮົາຍ່ອມບໍ່ລ່ວງລະເມີດສິກຂາບົດທີ່ເຮົາບັນຍັດໄວ້ ແມ່ນຍ້ອນເຫດແຫ່ງຊີວິດ ເໝືອນນ້ຳໃນມະຫາສະມຸດມີປົກກະຕິຄົງທີ່ ບໍ່ລົ້ນຝັ່ງ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິອາດຈະຈົງໃຈປົງຊີວິດສັດໄດ້"

**ຊີວິຕາໂວໂຣປະນະກະຖາ ຈົບ**

## ໙. ທຸກຄະຕິກະຖາ (໑໘໔)

## ວ່າດ້ວຍທຸກຄະຕິ

[໖໙໐] ສກ. ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິລະທຸກຄະຕິ[໑]ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິຍັງຍິນດີໃນຮູບທີ່ມີໃນອະບາຍແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນຜູ້ເຖິງພ້ອມດ້ວຍທິດຖິຍັງຍິນດີໃນຮູບທີ່ມີໃນອະບາຍ ທ່ານກໍບໍ່ຄວນຍອມຮັບວ່າ "ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິລະທຸກຄະຕິໄດ້"

ສກ. ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິລະທຸກຄະຕິໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິຍັງຍິນດີໃນສຽງ ຯລຯ ກິ່ນ ຯລຯ ຣົດ ຯລຯ ໂຜດຖັບພະ ທີ່ມີໃນອະບາຍ ຯລຯ ຍັງເສບເມຖຸນທຳກັບຍິງອະມະນຸດ ກັບສັດເດຍຣັດສານຕົວເມຍ ກັບນາງນາກ ຍັງຮັບແບ້ແລະແກະ ຍັງຮັບໄກ່ແລະໝູ ຍັງຮັບຊ້າງ ງົວ ມ້າ ແລະລາ ຍັງຮັບນົກກະທາ ນົກຄຸ່ມ ນົກຍູງ ແລະນົກເຂົາແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນຜູ້ເຖິງພ້ອມດ້ວຍທິດຖິຍັງຮັບນົກກະທາ ນົກຄຸ່ມ ນົກຍູງ ແລະນົກເຂົາທ່ານກໍບໍ່ຄວນຍອມຮັບວ່າ "ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິລະທຸກຄະຕິໄດ້"

[໖໕໑] ສກ. ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິລະທຸກຄະຕິໄດ້ ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິຍັງຍິນດີໃນຮູບທີ່ມີໃນອະບາຍແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນລະທຸກຄະຕິໄດ້ ແຕ່ຍັງຍິນດີໃນຮູບທີ່ມີໃນອະບາຍແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິລະທຸກຄະຕິໄດ້ ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິຍັງຍິນດີໃນສຽງ ຯລຯ ກິ່ນ ຯລຯ ຣົດ ຯລຯ ໂຜດຖັບພະທີ່ມີໃນອະບາຍ ຍັງຮັບນົກກະທາ ນົກຄຸ່ມ ນົກຍູງ ແລະນົກເຂົາແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນລະທຸກຄະຕິໄດ້ ແຕ່ຍັງຮັບນົກກະທາ ນົກຄຸ່ມ ນົກຍູງ ແລະນົກເຂົາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນລະທຸກຄະຕິໄດ້ ແລະບໍ່ຍິນດີໃນຮູບທີ່ມີໃນອະບາຍແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິລະທຸກຄະຕິໄດ້ ແລະບໍ່ຍິນດີໃນຮູບທີ່ມີໃນອະບາຍແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນລະທຸກຄະຕິໄດ້ແລະບໍ່ຍິນດີໃນສຽງ ຯລຯ ກິ່ນ ຯລຯ ຣົດ ຯລຯ ໂຜດຖັບພະທີ່ມີໃນອະບາຍ ບໍ່ເສບເມຖຸນທຳກັບຍິງອະມະນຸດ ກັບສັດເດຍຣັດສານຕົວເມຍ ກັບນາງນາກ ບໍ່ຮັບແບ້ແລະແກະ ບໍ່ຮັບໄກ່ແລະໝູ ບໍ່ຮັບຊ້າງ ງົວ ມ້າ ແລະລາ ຯລຯ ບໍ່ຮັບນົກກະທາ ນົກຄຸ່ມ ນົກຍູງ ແລະນົກເຂົາແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິລະທຸກຄະຕິໄດ້ ແລະບໍ່ຮັບນົກກະທາ ນົກຄຸ່ມນົກຍູງແລະນົກເຂົາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໖໕໔] ປຣ. ທ່ານບໍ່ຍອມຮັບວ່າ "ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິລະທຸກຄະຕິໄດ້"ແມ່ນບໍ?

ສກ. ແມ່ນ

ປຣ. ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິຍັງເກີດໃນນະຣົກ ຯລຯ ໃນກຳເນີດເດຍຣັດສານ ຍັງເກີດໃນພູມແຫ່ງເຜດແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ດັ່ງນັ້ນ ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິຈຶ່ງລະທຸກຄະຕິໄດ້

**ທຸກຄະຕິກະຖາ ຈົບ**

## ໑໐. ສັດຕະມະພະວິກະກະຖາ (໑໘໕)

## ວ່າດ້ວຍບຸກຄົນຜູ້ມີພົບທີ ໗

[໖໕໕] ປຣ.໑ ທ່ານບໍ່ຍອມຮັບວ່າ "ບຸກຄົນຜູ້ມີພົບທີ ໗ ລະທຸກຄະຕິໄດ້" ແມ່ນບໍ?

ສກ. ແມ່ນ

ປຣ. ບຸກຄົນຜູ້ມີພົບທີ ໗ ເພິ່ງເກີດໃນນະຣົກ ໃນກຳເນີດເດຍຣັດສານ ໃນພູມແຫ່ງເຜດໄດ້ ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ດັ່ງນັ້ນ ບຸກຄົນຜູ້ມີພົບທີ ໗ ຈຶ່ງລະທຸກຄະຕິໄດ້

**ສັດຕະມະພະວິກະກະຖາ ຈົບ**

**ທະວາທະສະມະວັກ ຈົບ**

## ລວມກະຖາທີ່ມີໃນວັກນີ້ ຄື



# ໑໒. ເຕນະສະມະວັກ

## ໑. ກັບປັດຖະກະຖາ (໑໔໘)

### ວ່າດ້ວຍຜູ້ດຳລົງຢູ່ໄດ້ຕະຫຼອດກັບ

[໘໕໔] ສກ. ບຸກຄົນຜູ້ກັບປັດຖະ ເພິ່ງດຳລົງຢູ່ໄດ້ຕະຫຼອດກັບແມ່ນບໍ?

ປຣ. ແມ່ນ

ສກ. ກັບດຳລົງຢູ່ແລະພຣະພຸດທະເຈົ້າກໍອຸບັດໃນໂລກແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

ສກ. ບຸກຄົນຜູ້ກັບປັດຖະເພິ່ງດຳລົງຢູ່ໄດ້ຕະຫຼອດກັບແມ່ນບໍ?

ປຣ. ແມ່ນ

ສກ. ກັບດຳລົງຢູ່ແລະພຣະສົງແຕກກັນແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

ສກ. ບຸກຄົນຜູ້ກັບປັດຖະເພິ່ງດຳລົງຢູ່ໄດ້ຕະຫຼອດກັບແມ່ນບໍ?

ປຣ. ແມ່ນ

ສກ. ກັບດຳລົງຢູ່ ແລະບຸກຄົນຜູ້ກັບປັດຖະກໍເຮັດກຳອັນເປັນເຫດໃຫ້ຕັ້ງຢູ່ຕະຫຼອດກັບແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

ສກ. ບຸກຄົນຜູ້ກັບປັດຖະເພິ່ງດຳລົງຢູ່ໄດ້ຕະຫຼອດກັບແມ່ນບໍ?

ປຣ. ແມ່ນ

ສກ. ກັບດຳລົງຢູ່ແລະບຸກຄົນຜູ້ກັບປັດຖະກະທຳກາລະແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

[໖໕໕] ສກ. ບຸກຄົນຜູ້ກັບປັດຖະເພິ່ງດຳລົງຢູ່ໄດ້ຕະຫຼອດກັບແມ່ນບໍ?
ປຣ. ແມ່ນ
ສກ. ເພິ່ງດຳລົງຢູ່ຕະຫຼອດກັບທີ່ເປັນອະດີດ ຕະຫຼອດກັບທີ່ເປັນອະນາຄົດແມ່ນບໍ?
ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ
ສກ. ບຸກຄົນຜູ້ກັບປັດຖະເພິ່ງດຳລົງຢູ່ໄດ້ຕະຫຼອດກັບແມ່ນບໍ?
ປຣ. ແມ່ນ
ສກ. ເພິ່ງດຳລົງຢູ່ຕະຫຼອດ ໒-໓-໔ ກັບແມ່ນບໍ?
ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໖໕໖] ສກ. ບຸກຄົນຜູ້ກັບປັດຖະເພິ່ງດຳລົງຢູ່ໄດ້ຕະຫຼອດກັບແມ່ນບໍ?
ປຣ. ແມ່ນ
ສກ. ບຸກຄົນຜູ້ກັບປັດຖະ ເມື່ອກັບຖືກໄຟໄໝ້ໄປຢູ່ໃສ?
ປຣ. ໄປໂລກກະທາດອື່ນ
ສກ. ຕາຍໄປຫຼືເຫາະໄປ
ປຣ. ຕາຍໄປ
ສກ. ກຳທີ່ເປັນເຫດໃຫ້ຕັ້ງຢູ່ຕະຫຼອດກັບເປັນກຳໃຫ້ຜົນໃນພົບຕໍ່ ໆ ໄປແມ່ນບໍ?
ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ
ສກ. ເຫາະໄປໄດ້ແມ່ນບໍ?
ປຣ. ແມ່ນ
ສກ. ບຸກຄົນຜູ້ກັບປັດຖະເປັນຜູ້ມີລິດແມ່ນບໍ?
ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ
ສກ. ບຸກຄົນຜູ້ກັບປັດຖະເປັນຜູ້ມີລິດແມ່ນບໍ?
ປຣ. ແມ່ນ
ສກ. ບຸກຄົນຜູ້ກັບປັດຖະຈະເລີນອິດທິບາດ ຄື ສັນທະ ວິຣິຍະ ຈິດຕະ ວິມັງສາ ແມ່ນບໍ?
ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໖໕໗] ປຣ. ທ່ານບໍ່ຍອມຮັບວ່າ "ບຸກຄົນຜູ້ກັບປັດຖະຍັງດຳລົງຢູ່ໄດ້ຕະຫຼອດກັບ" ແມ່ນບໍ?
ສກ. ແມ່ນ
ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ບຸກຄົນຜູ້ທຳລາຍສົງໃຫ້ແຕກກັນ ຍິນດີໃນການແຕກກັນ
ຢູ່ໃນອະທຳ ເປັນຜູ້ເຂົ້າເຖິງອະບາຍ ຢູ່ໃນນະຮົກຕະຫຼອດກັບ
ພາດຈາກນິບພານອັນເປັນທຳກະເສມຈາກໂຍຄະ

ສະເຫວີຍຜົນກຳຢູ່ໃນນະຣົກຕະຫຼອດກັບ
ຍ້ອນທຳລາຍສິ່ງທີ່ສາມັກຄີກັນໃຫ້ແຕກແຍກກັນ"

ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ບຸກຄົນຜູ້ກັບປັດຖະຈຶ່ງດຳລົງຢູ່ໄດ້ຕະຫຼອດກັບ

**ກັບປັດຖະກະຖາ ຈົບ**

## ໔. ກຸສະລະປະຕິລາພະກະຖາ (໑໔ກ)

## ວ່າດ້ວຍການໄດ້ຈິດທີ່ເປັນກຸສົນ

[໓໕໗] ສກ. ບຸກຄົນຜູ້ກັບປັດຖະບໍ່ເພິ່ງໄດ້ຈິດທີ່ເປັນກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ກັບປັດຖະເພິ່ງໃຫ້ທານແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນຜູ້ກັບປັດຖະເພິ່ງໃຫ້ທານ ທ່ານກໍບໍ່ຄວນຍອມຮັບວ່າ "ບຸກຄົນຜູ້ກັບປັດຖະບໍ່ເພິ່ງໄດ້ຈິດທີ່ເປັນກຸສົນ"

ສກ. ບຸກຄົນຜູ້ກັບປັດຖະບໍ່ເພິ່ງໄດ້ຈິດທີ່ເປັນກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ກັບປັດຖະເພິ່ງຖວາຍຈີວອນ ฯລฯ ບິນທະບາດ ฯລฯ ເສນາສະນະ ฯລฯ ຄິລານະປັດໄຈເພສັດບໍຣິຂານ ฯລฯ ຂອງຂົບຫຍ້ຳ ฯລฯ ຂອງບໍຣິໂພກ ฯລฯ ນ້ຳດື່ມ ฯລฯ ເພິ່ງໄຫວ້ພຣະເຈດີ ฯລฯ ຍົກດອກໄມ້ ฯລฯ ຂອງຫອມ ฯລฯ ເຄື່ອງລູບທາບູຊາພຣະເຈດີ ฯລฯ ກະທຳປະທັກຂິນພຣະເຈດີແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນຜູ້ກັບປັດຖະເພິ່ງກະທຳປະທັກຂິນພຣະເຈດີ ທ່ານກໍບໍ່ຄວນຍອມຮັບວ່າ "ບຸກຄົນຜູ້ກັບປັດຖະບໍ່ເພິ່ງໄດ້ຈິດທີ່ເປັນກຸສົນ ฯລฯ"

[໓໕໙] ປຣ. ບຸກຄົນຜູ້ກັບປັດຖະເພິ່ງໄດ້ຈິດທີ່ເປັນກຸສົນແມ່ນບໍ?

ສກ. ແມ່ນ

ປຣ. ບຸກຄົນຜູ້ກັບປັດຖະເພິ່ງໄດ້ຈິດທີ່ເປັນກຸສົນເປັນເຫດອອກຈາກຈິດທີ່ເປັນອະກຸສົນນັ້ນແມ່ນບໍ?

ສກ. ແມ່ນ

ປຣ. ເພິ່ງໄດ້ຈິດທີ່ເປັນກຸສົນທີ່ເປັນຣູບປາວະຈອນ ຯລຯ ອະຣູບປາວະຈອນ ຯລຯ ໂລກຸດຕະຣະແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

**ກຸສະລະປະຕິລາພະກະຖາ ຈົບ**

# ໓. ອະນັນຕະຣະປະຍຸດຕະກະຖາ (໑໘໗)

## ວ່າດ້ວຍບຸກຄົນຜູ້ໃຊ້ໃຫ້ເຮັດອະນັນຕະຣິຍະກຳ

[໖໓໐] ປຣ.໑ ບຸກຄົນຜູ້ໃຊ້ໃຫ້ເຮັດອະນັນຕະຣິຍະກຳເພິ່ງກ້າວລົງສູ່ສຳມັດຕະນິຍາມ ໄດ້ແມ່ນບໍ?

ສກ. ແມ່ນ

ປຣ. ເພິ່ງກ້າວລົງສູ່ມິດສັດຕະນິຍາມ ແລະສຳມັດຕະນິຍາມທັງ ໒ ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ບຸກຄົນຜູ້ໃຊ້ໃຫ້ເຮັດອະນັນຕະຣິຍະກຳ ເພິ່ງກ້າວລົງສູ່ສຳມັດຕະນິຍາມໄດ້ ແມ່ນບໍ?

ສກ. ແມ່ນ

ປຣ. ກຳທີ່ໃຊ້ໃຫ້ເຮັດນັ້ນກໍ່ຄວາມລຳຄານໃຈໃຫ້ ໃຫ້ເກີດຄວາມເດືອດຮ້ອນໃຈບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກກຳທີ່ໃຊ້ໃຫ້ເຮັດນັ້ນກໍ່ຄວາມລຳຄານໃຈໃຫ້ ໃຫ້ເກີດຄວາມເດືອດຮ້ອນໃຈໄດ້ທ່ານກໍບໍ່ຄວນຍອມຮັບວ່າ "ບຸກຄົນຜູ້ໃຊ້ໃຫ້ເຮັດອະນັນຕະຣິຍະກຳ ເພິ່ງກ້າວລົງສູ່ສຳມັດຕະນິຍາມໄດ້"

[໖໓໑] ສກ. ບຸກຄົນຜູ້ໃຊ້ໃຫ້ເຮັດອະນັນຕະຣິຍະກຳ ເປັນຜູ້ບໍ່ຄວນກ້າວລົງສູ່ສຳມັດຕະນິຍາມແມ່ນບໍ?

ປຣ. ແມ່ນ

ສກ. ເຂົາໄດ້ປົງຊີວິດມານດາ ປົງຊີວິດບິດາ ປົງຊີວິດພຣະອະຣະຫັນ ມີຈິດຄິດປະທຸດສະຮ້າຍທຳຮ້າຍພຣະພຸດທະເຈົ້າຈົນພຣະໂລຫິດຫໍ້ ທຳລາຍສົງໃຫ້ແຕກກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ໃຊ້ໃຫ້ເຮັດອະນັນຕະຣິຍະກຳ ລົ້ມເລີກກຳນັ້ນແລ້ວ ບັນເທົາຄວາມລຳຄານໃຈ ກຳຈັດຄວາມເດືອດຮ້ອນໃຈໄດ້ແລ້ວ ເປັນຜູ້ບໍ່ຄວນກ້າວລົງສູ່ສຳມັດຕະນິຍາມ ແມ່ນບໍ?

ປຣ. ແມ່ນ

ສກ. ເຂົາປົງຊີວິດມານດາ ປົງຊີວິດບິດາ ฯລฯ ທຳລາຍສົງໃຫ້ແຕກກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ບຸກຄົນຜູ້ໃຊ້ໃຫ້ເຮັດອະນັນຕະຣິຍະກຳລົ້ມເລີກກຳນັ້ນແລ້ວ ບັນເທົາຄວາມລຳຄານໃຈ ກຳຈັດຄວາມເດືອດຮ້ອນໃຈໄດ້ແລ້ວ ເປັນຜູ້ບໍ່ຄວນກ້າວລົງສູ່ສຳມັດຕະນິຍາມ ແມ່ນບໍ?

ປຣ. ແມ່ນ

ສກ. ເຂົາລົ້ມເລີກກຳນັ້ນ ບັນເທົາຄວາມລຳຄານໃຈ ກຳຈັດຄວາມເດືອດຮ້ອນໃຈແລ້ວບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກເຂົາລົ້ມເລີກກຳນັ້ນແລ້ວ ບັນເທົາຄວາມລຳຄານໃຈ ກຳຈັດຄວາມເດືອດຮ້ອນໃຈໄດ້ແລ້ວ ທ່ານກໍບໍ່ຄວນຍອມຮັບວ່າ "ບຸກຄົນຜູ້ໃຊ້ໃຫ້ເຮັດອະນັນຕະຣິຍະກຳລົ້ມເລີກກຳນັ້ນແລ້ວ ບັນເທົາຄວາມລຳຄານໃຈ ກຳຈັດຄວາມເດືອດຮ້ອນໃຈໄດ້ແລ້ວ ເປັນຜູ້ບໍ່ຄວນກ້າວລົງສູ່ສຳມັດຕະນິຍາມ"

[៥៥៨] ປຣ. ບຸກຄົນຜູ້ໃຊ້ໃຫ້ເຮັດອະນັນຕະຣິຍະກຳ ເພິ່ງກ້າວລົງສູ່ສຳມັດຕະນິຍາມໄດ້ແມ່ນບໍ?

ສກ. ແມ່ນ

ປຣ. ເຂົາເປັນຜູ້ໃຊ້ໃຫ້ເຮັດກຳນັ້ນບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກເຂົາເປັນຜູ້ໃຊ້ໃຫ້ເຮັດກຳນັ້ນ ທ່ານກໍບໍ່ຄວນຍອມຮັບວ່າ "ບຸກຄົນຜູ້ໃຊ້ໃຫ້ເຮັດອະນັນຕະຣິຍະກຳເພິ່ງກ້າວລົງສູ່ສຳມັດຕະນິຍາມ"

**ອະນັນຕະຣະປະຍຸດຕະກະຖາ ຈົບ**

# ៤. ນິຍະຕັດສະນິຍາມະກະຖາ (១៤៧)

## ວ່າດ້ວຍນິຍາມຂອງບຸກຄົນຜູ້ແນ່ນອນ

[៥៥៩] ສກ. ບຸກຄົນຜູ້ແນ່ນອນກ້າວລົງສູ່ນິຍາມ ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ແນ່ນອນໃນມິດສັດຕະກ້າວລົງສູ່ສຳມັດຕະນິຍາມໄດ້ ບຸກຄົນຜູ້ແນ່ນອນໃນສຳມັດຕະກ້າວລົງສູ່ມິດສັດຕະນິຍາມໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ບຸກຄົນຜູ້ແນ່ນອນກ້າວລົງສູ່ນິຍາມໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ແນ່ນອນຈະເລີນມັກມາກ່ອນແລ້ວ ຈຶ່ງກ້າວລົງສູ່ນິຍາມໃນພາຍຫຼັງແມ່ນບໍ?

ປຣ. ບໍ່ຄວນກ່າວແບວນັ້ນ ฯລฯ

ສກ. ບຸກຄົນຈະເລີນໂສດາປັດຕິມັກມາກ່ອນແລ້ວ ຈຶ່ງກ້າວລົງສູ່ໂສດາປັດຕິນິຍາມໃນພາຍຫຼັງແມ່ນບໍ?

ປຣ. ບໍ່ຄວນກ່າວແບວນັ້ນ ฯລฯ

ສກ. ບຸກຄົນຜູ້ແນ່ນອນຈະເລີນສະກະທາຄາມິມັກ ฯລฯ ອະນາຄາມິມັກ ฯລฯ ອະຣະຫັດຕະມັກມາກ່ອນແລ້ວ ຈຶ່ງກ້າວລົງສູ່ອະຣະຫັດຕະນິຍາມໃນພາຍຫຼັງແມ່ນບໍ?

ປຣ. ບໍ່ຄວນກ່າວແບວນັ້ນ ฯລฯ

ສກ. ບຸກຄົນຜູ້ແນ່ນອນຈະເລີນສະຕິປັດຖານ ฯລฯ ສຳມັບປະທານ ฯລฯ ອິດທິບາດ ฯລฯ ອິນຊີ ฯລฯ ພະລະ ฯລฯ ໂພດຊົງມາກ່ອນແລ້ວຈຶ່ງກ້າວລົງສູ່ນິຍາມໃນພາຍຫຼັງແມ່ນບໍ?

ປຣ. ບໍ່ຄວນກ່າວແບວນັ້ນ ฯລฯ

[໖໖໔] ປຣ. ທ່ານບໍ່ຍອມຮັບວ່າ "ບຸກຄົນຜູ້ແນ່ນອນກ້າວລົງສູ່ນິຍາມໄດ້" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະໂພທິສັດເປັນຜູ້ບໍ່ຄວນຈະບັນລຸທຳໃນຊາດນັ້ນແມ່ນບໍ?

ສກ. ບໍ່ຄວນກ່າວແບວນັ້ນ ฯລฯ

ປຣ. ດັ່ງນັ້ນ ບຸກຄົນຜູ້ແນ່ນອນຈຶ່ງກ້າວລົງສູ່ນິຍາມໄດ້

**ນິຍະຕັດສະນິຍາມະກະຖາ ຈົບ**

# ໕. ນິວຸຕະກະຖາ (໑໓໐)

## ວ່າດ້ວຍຜູ້ມີຈິດຖືກນິວອນຄອບງຳ

[໖໖໕] ສກ. ບຸກຄົນຜູ້ຖືກນິວອນຄອບງຳລະນິວອນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ກຳໜັດແລ້ວລະຣາຄະ ຜູ້ຂັດເຄືອງແລ້ວລະໂທສະ ຜູ້ຫຼົງແລ້ວລະໂມຫະ ຜູ້ເສົ້າໝອງແລ້ວລະກິເລດໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແບວນັ້ນ ฯລฯ

ສກ. ບຸກຄົນລະຣາຄະດ້ວຍຣາຄະ ລະໂທສະດ້ວຍໂທສະ ລະໂມຫະດ້ວຍໂມຫະ ລະກິເລດ ດ້ວຍກິເລດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຣາຄະສຳປະຍຸດດ້ວຍຈິດ ມັກກໍສຳປະຍຸດດ້ວຍຈິດແມ່ນບໍ?

ປຣ. ແມ່ນ

ສກ. ມີການປະຊຸມແຫ່ງຜັດສະ ໔ ຢ່າງ ຯລຯ ຈິດ ໔ ດວງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຣາຄະເປັນອະກຸສົນ ແຕ່ມັກເປັນກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ເປັນກຸສົນແລະອະກຸສົນ ທີ່ມີໂທດແລະບໍ່ມີໂທດ ທີ່ຊົ່ວແລະປະນີດ ທີ່ເປັນຝ່າຍດຳ ເປັນຝ່າຍຂາວແລະເປັນຝ່າຍມີສ່ວນປຽບ ມາປະຊຸມກັນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໕໕໕] ສກ. ສະພາວະທຳທີ່ເປັນກຸສົນແລະອະກຸສົນ ທີ່ມີໂທດແລະບໍ່ມີໂທດ ທີ່ຊົ່ວແລະ ປະນີດ ທີ່ເປັນຝ່າຍດຳ ເປັນຝ່າຍຂາວແລະເປັນຝ່າຍມີສ່ວນປຽບ ມາປະຊຸມກັນໄດ້ ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ສິ່ງທີ່ຢູ່ຫ່າງໄກກັນ ຫຼາຍແທ້ ໔ ຢ່າງນີ້ ສິ່ງທີ່ຢູ່ຫ່າງໄກກັນຫຼາຍແທ້ ໔ ຢ່າງ ອັນໃດແດ່ ຄື

໑. ທ້ອງຟ້າກັບແຜ່ນດິນ ນີ້ເປັນສິ່ງທີ່ຢູ່ຫ່າງໄກກັນຫຼາຍແທ້ຢ່າງທີ ໑
ຯລຯ

ຍ້ອນແນວນັ້ນ ທຳຂອງສັດຕະບຸຣຸດຈຶ່ງຫ່າງໄກກັນກັບທຳຂອງອະສັດຕະບຸຣຸດ"
ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ສະພາວະທຳທີ່ເປັນກຸສົນແລະອະກຸສົນ ຯລຯ ມາປະຊຸມກັນໄດ້"

ສກ. ບຸກຄົນຜູ້ຖືການິວອນຄອບງຳລະນິວອນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ບຸກຄົນນັ້ນ ເມື່ອຈິດເປັນສະມາທິ ບໍລິສຸດ ຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າໝອງ ອ່ອນ ຄວນແກ່ການໃຊ້ ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ ຍ່ອມນ້ອມຈິດໄປເພື່ອຍານເປັນເຄື່ອງສິ້ນອາສະວະ" ມີຢູ່ຈິງບໍ່ ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ “ບຸກຄົນຜູ້ຖືກນິວອນຄອບງຳລະນິວອນໄດ້” ຯລຯ

[໕໕໗] ປຣ. ທ່ານບໍ່ຍອມຮັບວ່າ “ບຸກຄົນຜູ້ຖືກນິວອນຄອບງຳລະນິວອນໄດ້” ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ “ພິກຂຸນັ້ນເມື່ອຮູ້ ເຫັນຢູ່ແນວນີ້ ຈິດຍ່ອມລຸດພົ້ນຈາກກາມາສະວະແດ່ ຯລຯ ຈາກອະວິດຊາສະວະແດ່” ມີຢູ່ຈິງບໍ່ ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ບຸກຄົນຜູ້ຖືກນິວອນຄອບງຳຈຶ່ງລະນິວອນໄດ້

**ນິວຸຕະກະຖາ ຈົບ**

## ໖. ສຳມຸຂີພູຕະກະຖາ (໑໖໑)

## ວ່າດ້ວຍຜູ້ພຽບພ້ອມດ້ວຍສັງໂຍດ

[໕໕໘] ສກ. ບຸກຄົນຜູ້ພຽບພ້ອມດ້ວຍສັງໂຍດລະສັງໂຍດໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ກຳຫັດແລ້ວລະຣາຄະ ຜູ້ຂັດເຄືອງແລ້ວລະໂທສະ ຜູ້ຫຼົງແລ້ວລະໂມຫະ ຜູ້ເສົ້າໝອງແລ້ວລະກິເລດໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນລະຣາຄະດ້ວຍຣາຄະ ລະໂທສະດ້ວຍໂທສະ ລະໂມຫະດ້ວຍໂມຫະ ລະກິເລດ ດ້ວຍກິເລດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຣາຄະສຳປະຍຸດດ້ວຍຈິດ ມັກກໍສຳປະຍຸດດ້ວຍຈິດແມ່ນບໍ?

ປຣ. ແມ່ນ

ສກ. ມີການປະຊຸມແຫ່ງຜັດສະ ໒ ຢ່າງ ຯລຯ ຈິດ ໒ ດວງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຣາຄະເປັນອະກຸສົນ ແຕ່ມັກເປັນກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ເປັນກຸສົນ ແລະອະກຸສົນ ທີ່ມີໂທດແລະບໍ່ມີໂທດ ທີ່ຊົ່ວແລະປະນີດ ທີ່ເປັນຝ່າຍດຳ ເປັນຝ່າຍຂາວ ແລະເປັນຝ່າຍມີສ່ວນປຽບ ມາປະຊຸມກັນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໖໖໙] ສກ. ສະພາວະທຳທີ່ເປັນກຸສົນ ແລະອະກຸສົນ ທີ່ມີໂທດແລະບໍ່ມີໂທດ ທີ່ຊົ່ວແລະປະນີດ ທີ່ເປັນຝ່າຍດຳ ເປັນຝ່າຍຂາວ ແລະເປັນຝ່າຍມີສ່ວນປຽບ ມາປະຊຸມກັນໄດ້ ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ສິ່ງທີ່ຢູ່ຫ່າງໄກກັນຫຼາຍແທ້ ໔ ຢ່າງນີ້ ສິ່ງທີ່ຢູ່ຫ່າງໄກກັນຫຼາຍແທ້ ໔ ຢ່າງ ອັນໃດແດ່ ຄື

໑. ທ້ອງຟ້າກັບແຜ່ນດິນ ນີ້ເປັນສິ່ງທີ່ຢູ່ຫ່າງໄກກັນຫຼາຍແທ້ຢ່າງທີ ໑

ฯລฯ

ຍ້ອນແນວນັ້ນ ທຳຂອງສັດຕະບຸຣຸດຈຶ່ງຫ່າງໄກກັນກັບທຳຂອງອະສັດຕະບຸຣຸດ"

ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ສະພາວະທຳທີ່ເປັນກຸສົນ ແລະອະກຸສົນ ฯລฯ ມາປະຊຸມກັນໄດ້"

ສກ. ບຸກຄົນຜູ້ພຽບພ້ອມດ້ວຍສັງໂຍດລະສັງໂຍດໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ບຸກຄົນນັ້ນ ເມື່ອຈິດຕັ້ງໝັ້ນແນວນີ້ ฯລฯ ຍ່ອມນ້ອມຈິດໄປເພື່ອຍານເປັນເຄື່ອງສິ້ນອາສະວະ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານກໍບໍ່ຄວນຍອມຮັບວ່າ "ບຸກຄົນຜູ້ພຽບພ້ອມດ້ວຍສັງໂຍດລະສັງໂຍດໄດ້"

[໖໗໐] ປຣ. ທ່ານບໍ່ຍອມຮັບວ່າ "ບຸກຄົນຜູ້ພຽບພ້ອມດ້ວຍສັງໂຍດລະສັງໂຍດໄດ້" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸນັ້ນເມື່ອຮູ້ ເຫັນຢູ່ແນວນີ້ ຈິດຍ່ອມລຸດພົ້ນຈາກກາມາສະວະແດ່ ฯລฯ ຈາກອະວິດຊາສະວະແດ່" ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ບຸກຄົນຜູ້ພຽບພ້ອມດ້ວຍສັງໂຍດຈຶ່ງລະສັງໂຍດໄດ້

**ສຳມຸຂີພູຕະກະຖາ ຈົບ**

# ໗. ສະມາປັນໂນອັດສາເທຕິກະຖາ (໑໖໘)

## ວ່າດ້ວຍຜູ້ເຂົ້າສະມາບັດຍ່ອມຍິນດີ

[໕໗໑] ສກ. ບຸກຄົນຜູ້ເຂົ້າສະມາບັດຍ່ອມຍິນດີ ຄວາມຍິນດີໃນຊານມີຊານເປັນອາລົມ ແມ່ນບໍ?

ປຣ. ແມ່ນ

ສກ. ຊານນັ້ນເປັນອາລົມຂອງຊານນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

ສກ. ຊານນັ້ນເປັນອາລົມຂອງຊານນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຖືກຕ້ອງຜັດສະນັ້ນດ້ວຍຜັດສະນັ້ນ ສະເຫວີຍເວທະນານັ້ນດ້ວຍເວທະນານັ້ນ ຈຳສັນຍານັ້ນດ້ວຍສັນຍານັ້ນ ຈົງໃຈເຈຕະນານັ້ນດ້ວຍເຈຕະນານັ້ນ ຄິດຈິດນັ້ນດ້ວຍຈິດນັ້ນ ນຶກວິຕົກນັ້ນດ້ວຍວິຕົກນັ້ນ ຕອງວິຈານນັ້ນດ້ວຍວິຈານນັ້ນ ເອີບອີ່ມປີຕິນັ້ນດ້ວຍປີຕິນັ້ນ ຣະລຶກສະຕິນັ້ນດ້ວຍສະຕິນັ້ນ ຮູ້ຊັດແຈ້ງປັນຍານັ້ນດ້ວຍປັນຍານັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

ສກ. ຄວາມຍິນດີໃນຊານສຳປະຍຸດດ້ວຍຈິດ ຊານກໍສຳປະຍຸດດ້ວຍຈິດແມ່ນບໍ?

ປຣ. ແມ່ນ

ສກ. ມີການປະຊຸມແຫ່ງຜັດສະ ໒ ຢ່າງ ຯລຯ ຈິດ ໒ ດວງແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

ສກ. ຄວາມຍິນດີໃນຊານເປັນອະກຸສົນ ແຕ່ຊານເປັນກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ເປັນກຸສົນແລະອະກຸສົນ ທີ່ມີໂທດແລະບໍ່ມີໂທດ ທີ່ຊົ່ວແລະປະນີດ ທີ່ເປັນຝ່າຍດຳ ເປັນຝ່າຍຂາວ ແລະເປັນຝ່າຍມີສ່ວນປຽບ ມາປະຊຸມກັນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

[໕໗໒] ສກ. ສະພາວະທຳທີ່ເປັນກຸສົນແລະອະກຸສົນ ທີ່ມີໂທດແລະບໍ່ມີໂທດ ທີ່ຊົ່ວແລະປະນີດ ທີ່ເປັນຝ່າຍດຳ ເປັນຝ່າຍຂາວ ແລະເປັນຝ່າຍມີສ່ວນປຽບ ມາປະຊຸມກັນໄດ້ ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ສິ່ງທີ່ຢູ່ຫ່າງໄກກັນຫຼາຍແທ້ ໔ ຢ່າງນີ້

ສິ່ງທີ່ຢູ່ຫ່າງໄກກັນຫຼາຍແທ້ ໔ ຢ່າງ ອັນໃດແດ່ ຄື

໑. ທ້ອງຟ້າກັບແຜ່ນດິນ ນີ້ເປັນສິ່ງທີ່ຢູ່ຫ່າງໄກກັນຫຼາຍແທ້ຢ່າງທີ່
ฯລฯ

ຍ້ອນແນວນັ້ນ ທຳຂອງສັດຕະບຸຣຸດຈຶ່ງຫ່າງໄກກັນກັບທຳຂອງອະສັດຕະບຸຣຸດ”
ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ “ສະພາວະທຳທີ່ເປັນກຸສົນແລະອະກຸສົນ ທີ່ມີໂທດແລະບໍ່ມີໂທດ ທີ່ຊົ່ວແລະປະນີດ ທີ່ເປັນຝ່າຍດຳ ເປັນຝ່າຍຂາວ ແລະເປັນຝ່າຍມີສ່ວນ ປຽບມາປະຊຸມກັນໄດ້”

[໕໗໓] ປຣ. ທ່ານບໍ່ຍອມຮັບວ່າ “ຜູ້ເຂົ້າສະມາບັດຍ່ອມຍິນດີ ຄວາມຍິນດີໃນຊານມີຊານ ເປັນອາລົມ” ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ “ພິກຂຸທັງຫຼາຍ ພິກຂຸໃນທຳວິໄນນີ້ ສະຫງັດຈາກກາມທັງຫຼາຍ ฯລฯ ບັນລຸປະຖົມຊານຢູ່ ທ່ານຍິນດີໃນປະຖົມຊານນັ້ນ ຕິດໃຈ ປະຖົມຊານນັ້ນ ແລະເຖິງຄວາມດີໃຈດ້ວຍຊານນັ້ນ ຍ້ອນວິຕົກແລະວິຈານສະຫງົບລະງັບໄປ ບັນລຸທຸຕິຍະຊານ ฯລฯ ບັນລຸຕະຕິຍະຊານ ฯລฯ ບັນລຸຈະຕຸດຖະຊານຢູ່ ທ່ານຍິນດີໃນຈະຕຸດ ຖະຊານນັ້ນ ຕິດໃຈຈະຕຸດຖະຊານນັ້ນ ແລະເຖິງຄວາມດີໃຈດ້ວຍຈະຕຸດຖະຊານນັ້ນ”
ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ຜູ້ເຂົ້າສະມາບັດຍ່ອມຍິນດີ ຄວາມຍິນດີໃນຊານຈຶ່ງມີຊານເປັນອາລົມ

**ສະມາປັນໂນອັດສາເທຕິກະຖາ ຈົບ**

## ໗. ອະສາຕະຣາຄະກະຖາ (໑໓໓)

## ວ່າດ້ວຍຄວາມຍິນດີໃນສິ່ງທີ່ບໍ່ພໍໃຈ

[໕໗໔] ສກ. ຄວາມຍິນດີໃນສິ່ງທີ່ບໍ່ພໍໃຈມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ສັດທັງຫຼາຍເປັນຜູ້ຍິນດີຢ່າງຍິ່ງໃນທຸກ ບາງພວກປາຖະໜາ ຍິນດີ ສະແຫວງຫາ ຄົ້ນຫາ ເສາະຫາທຸກ ຢຶດທຸກ ດຳລົງຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ສັດທັງຫຼາຍເປັນຜູ້ຍິນດີຢ່າງຍິ່ງໃນສຸກ ບາງພວກປາຖະໜາ ຍິນດີ ສະແຫວງຫາ ຄົ້ນຫາ ເສາະຫາສຸກ ຢຶດສຸກ ດຳລົງຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກສັດທັງຫຼາຍເປັນຜູ້ຍິນດີຢ່າງຍິ່ງໃນສຸກ ບາງພວກປາຖະໜາ ຍິນດີສະແຫວງຫາ ຄົ້ນຫາ ເສາະຫາສຸກ ຢຶດສຸກ ດຳລົງຢູ່ ທ່ານກໍບໍ່ຄວນຍອມຮັບວ່າ “ຄວາມຍິນດີໃນສິ່ງທີ່ບໍ່ພໍໃຈມີຢູ່”

ສກ. ຄວາມຍິນດີໃນສິ່ງທີ່ບໍ່ພໍໃຈມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຣາຄານຸໄສນອນເນື່ອງຢູ່ໃນທຸກຂະເວທະນາ ປະຕິຄານຸໄສນອນເນື່ອງຢູ່ໃນສຸກຂະເວທະນາ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຣາຄານຸໄສນອນເນື່ອງຢູ່ໃນສຸກຂະເວທະນາ ປະຕິຄານຸໄສນອນເນື່ອງຢູ່ໃນທຸກຂະເວທະນາ ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຣາຄານຸໄສນອນເນື່ອງຢູ່ໃນສຸກຂະເວທະນາ ປະຕິຄານຸໄສນອນເນື່ອງຢູ່ໃນທຸກຂະເວທະນາ ທ່ານກໍບໍ່ຄວນຍອມຮັບວ່າ “ຄວາມຍິນດີໃນສິ່ງທີ່ບໍ່ພໍໃຈມີຢູ່”

[ຜກ໕] ປຣ. ທ່ານບໍ່ຍອມຮັບວ່າ “ຄວາມຍິນດີໃນສິ່ງທີ່ບໍ່ພໍໃຈມີຢູ່” ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ “ບຸກຄົນນັ້ນສົມບູນດ້ວຍຄວາມຍິນດີຫຼືຄວາມຍິນຮ້າຍແນວນີ້ແລ້ວ ສະເຫວີຍເວທະນາແນວໃດແນວໜຶ່ງຈະເປັນສຸກຂະເວທະນາ ທຸກຂະເວທະນາ ຫຼື ອະທຸກຂະມະສຸກຂະເວທະນາກໍຕາມ ເຂົາຍ່ອມເພີດເພີນ ຈົ່ມຮອດ ຕິດໃຈເວທະນານັ້ນ” ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ຄວາມຍິນດີໃນສິ່ງທີ່ບໍ່ພໍໃຈຈຶ່ງມີຢູ່

**ອະສາຕະຣາຄະກະຖາ ຈົບ**

# ໙. ທຳມະຕັນຫາອັບພະຍາກະຕາຕິກະຖາ (໑໖໔)

## ວ່າດ້ວຍທຳມະຕັນຫາເປັນອັບພະຍາກະຕະ

[ຜກ໖] ສກ. ທຳມະຕັນຫາເປັນອັບພະຍາກະຕະແມ່ນບໍ?

ປຣ. ແມ່ນ

ສກ. ທຳມະຕັນຫາເປັນອັບພະຍາກະຕະຝ່າຍວິບາກ ເປັນອັບພະຍາກະຕະຝ່າຍກິຣິຍາ ເປັນຮູບເປັນນິບພານ ເປັນຈັກຂາຍະຕະນະ ຯລຯ ເປັນໂຜດຖັບພາຍະຕະນະ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ທຳມະຕັນຫາເປັນອັບພະຍາກະຕະແມ່ນບໍ?

ປຣ. ແມ່ນ

ສກ. ຮູບຕັນຫາເປັນອັບພະຍາກະຕະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ທຳມະຕັນຫາເປັນອັບພະຍາກະຕະແມ່ນບໍ?

ປຣ. ແມ່ນ

ສກ. ສັດທະຕັນຫາ ຯລຯ ຄັນທະຕັນຫາ ຯລຯ ຣະສະຕັນຫາ ຯລຯ ໂຜດຖັບພະຕັນຫາ ເປັນອັບພະຍາກະຕະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບຕັນຫາເປັນອະກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ທຳມະຕັນຫາເປັນອະກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສັດທະຕັນຫາ ຯລຯ ໂຜດຖັບພະຕັນຫາ ເປັນອະກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ທຳມະຕັນຫາເປັນອະກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[ຜກຖ] ສກ. ທຳມະຕັນຫາເປັນອັບພະຍາກະຕະແມ່ນບໍ?

ປຣ. ແມ່ນ

ສກ. ຕັນຫາພຣະຜູ້ມີພຣະພາກເຈົ້າຕັດວ່າເປັນອະກຸສົນບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຕັນຫາ ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນອະກຸສົນ ທ່ານກໍບໍ່ຄວນຍອມຮັບວ່າ "ທຳມະຕັນຫາເປັນອັບພະຍາກະຕະ"

ສກ. ທຳມະຕັນຫາເປັນອັບພະຍາກະຕະແມ່ນບໍ?

ປຣ. ແມ່ນ

ສກ. ໂລພະພຣະຜູ້ມີພຣະພາກເຈົ້າຕັດວ່າເປັນອະກຸສົນ ທຳມະຕັນຫາເປັນໂລພະບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກໂລພະ ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນອະກຸສົນ ທຳມະຕັນຫາເປັນໂລພະ ທ່ານກໍບໍ່ຄວນຍອມຮັບວ່າ "ທຳມະຕັນຫາເປັນອັບພະຍາກະຕະ"

[໕໗໘] ສກ. ໂລພະ ຄື ທຳມະຕັນຫາເປັນອັບພະຍາກະຕະແມ່ນບໍ?

ປຣ. ແມ່ນ

ສກ. ໂລພະຄືຮູບຕັນຫາເປັນອັບພະຍາກະຕະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂລພະຄືທຳມະຕັນຫາເປັນອັບພະຍາກະຕະແມ່ນບໍ?

ປຣ. ແມ່ນ

ສກ. ໂລພະຄືສັດທະຕັນຫາ ຯລຯ ໂລພະຄືໂຜດຖັບພະຕັນຫາ ເປັນອັບພະຍາກະຕະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂລພະຄືຮູບຕັນຫາເປັນອະກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ໂລພະຄືທຳມະຕັນຫາເປັນອະກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂລພະຄືສັດທະຕັນຫາ ຯລຯ ໂລພະຄືໂຜດຖັບພະຕັນຫາ ເປັນອະກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ໂລພະຄືທຳມະຕັນຫາເປັນອະກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໕໗໙] ສກ. ທຳມະຕັນຫາເປັນອັບພະຍາກະຕະແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ຕັນຫາອັນເຮັດໃຫ້ເກີດອີກ ປະກອບດ້ວຍຄວາມເພີດເພີນ ແລະຄວາມກຳໜັດ ມີປົກກະຕິໃຫ້ເພີດເພີນໃນອາລົມນັ້ນ ໆ ຄື ກາມຕັນຫາ ພະວະຕັນຫາ ວິພະວະຕັນຫາ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານກໍບໍ່ຄວນຍອມຮັບວ່າ "ທຳມະຕັນຫາເປັນອັບພະຍາກະຕະ"

[໕໘໐] ປຣ. ທ່ານບໍ່ຍອມຮັບວ່າ "ທຳມະຕັນຫາເປັນອັບພະຍາກະຕະ" ແມ່ນບໍ?

ສກ. ແມ່ນ

ປຣ. ຕັນຫານັ້ນເປັນທຳມະຕັນຫາບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກຕັນຫານັ້ນເປັນທຳມະຕັນຫາ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ທຳມະຕັນຫາເປັນອັບພະຍາກະຕະ"

**ທຳມະຕັນຫາອັບຍາກະຕາຕິກະຖາ ຈົບ**

## ໑໐. ທຳມະຕັນຫານະທຸກຂະສະມຸທະໂຍຕິກະຖາ (໑໓໕)

## ວ່າດ້ວຍທຳມະຕັນຫາບໍ່ເປັນທຸກຂະສະມຸໄທ

[໖໗໑] ສກ. ທຳມະຕັນຫາບໍ່ເປັນທຸກຂະສະມຸໄທແມ່ນບໍ?

ປຣ.໑ ແມ່ນ

ສກ. ຮູບຕັນຫາບໍ່ເປັນທຸກຂະສະມຸໄທແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ທຳມະຕັນຫາບໍ່ເປັນທຸກຂະສະມຸໄທແມ່ນບໍ?

ປຣ. ແມ່ນ

ສກ. ສັດທະຕັນຫາ ຯລຯ ຄັນທະຕັນຫາ ຯລຯ ຣະສະຕັນຫາ ຯລຯ ໂຜດຖັບພະຕັນຫາ ບໍ່ເປັນທຸກຂະສະມຸໄທແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບຕັນຫາເປັນທຸກຂະສະມຸໄທແມ່ນບໍ?

ປຣ. ແມ່ນ

ສກ. ທຳມະຕັນຫາເປັນທຸກຂະສະມຸໄທແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສັດທະຕັນຫາ ຯລຯ ຄັນທະຕັນຫາ ຯລຯ ຣະສະຕັນຫາ ຯລຯ ໂຜດຖັບພະຕັນຫາ ເປັນທຸກຂະສະມຸໄທແມ່ນບໍ?

ປຣ. ແມ່ນ

ສກ. ທຳມະຕັນຫາເປັນທຸກຂະສະມຸໄທແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໖໗໔] ສກ. ທຳມະຕັນຫາບໍ່ເປັນທຸກຂະສະມຸໄທແມ່ນບໍ?

ປຣ. ແມ່ນ

ສກ. ຕັນຫາພຣະຜູ້ມີພຣະພາກເຈົ້າຕັດວ່າເປັນທຸກຂະສະມຸໄທບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຕັນຫາ ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນທຸກຂະສະມຸໄທ ທ່ານກໍບໍ່ຄວນຍອມຮັບວ່າ "ທໍາມະຕັນຫາບໍ່ເປັນທຸກຂະສະມຸໄທ"

ສກ. ທໍາມະຕັນຫາບໍ່ເປັນທຸກຂະສະມຸໄທແມ່ນບໍ?

ປຣ. ແມ່ນ

ສກ. ໂລພະພຣະຜູ້ມີພຣະພາກເຈົ້າຕັດວ່າເປັນທຸກຂະສະມຸໄທ ທໍາມະຕັນຫາເປັນໂລພະບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກໂລພະ ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນທຸກຂະສະມຸໄທ ແລະທໍາມະຕັນຫາເປັນໂລພະ ທ່ານກໍບໍ່ຄວນຍອມຮັບວ່າ "ທໍາມະຕັນຫາບໍ່ເປັນທຸກຂະສະມຸໄທ"

[໕໗໓] ສກ. ໂລພະຄືທໍາມະຕັນຫາບໍ່ເປັນທຸກຂະສະມຸໄທແມ່ນບໍ?

ປຣ. ແມ່ນ

ສກ. ໂລພະຄືຮູບຕັນຫາບໍ່ເປັນທຸກຂະສະມຸໄທແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂລພະຄືທໍາມະຕັນຫາບໍ່ເປັນທຸກຂະສະມຸໄທແມ່ນບໍ?

ປຣ. ແມ່ນ

ສກ. ໂລພະຄືສັດທະຕັນຫາ ຯລຯ ໂລພະຄືຄັນທະຕັນຫາ ຯລຯ ໂລພະຄືຣະສະຕັນຫາ ຯລຯ ໂລພະຄືໂຜດຖັບພະຕັນຫາ ບໍ່ເປັນທຸກຂະສະມຸໄທແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂລພະ ຄື ຮູບຕັນຫາເປັນທຸກຂະສະມຸໄທແມ່ນບໍ?

ປຣ. ແມ່ນ

ສກ. ໂລພະຄືທໍາມະຕັນຫາເປັນທຸກຂະສະມຸໄທແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂລພະຄືສັດທະຕັນຫາ ຯລຯ ໂລພະຄືໂຜດຖັບພະຕັນຫາ ເປັນທຸກຂະສະມຸໄທແມ່ນບໍ?

ປຣ. ແມ່ນ

ສກ. ໂລພະຄືທໍາມະຕັນຫາເປັນທຸກຂະສະມຸໄທແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໕໗໔] ສກ. ທໍາມະຕັນຫາບໍ່ເປັນທຸກຂະສະມຸໄທແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ “ຕັນຫາອັນເຮັດໃຫ້ເກີດອີກ ປະກອບດ້ວຍຄວາມເພີດເພີນແລະຄວາມກຳໜັດ ມີປົກກະຕິໃຫ້ເພີດເພີນໃນອາລົມນັ້ນ ໆ ຄື ກາມຕັນຫາ ພະວະຕັນຫາ ວິພະວະຕັນຫາ” ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ “ທຳມະຕັນຫາບໍ່ເປັນທຸກຂະສະມຸໄທ”

[໖໙໕] ປຣ. ທ່ານບໍ່ຍອມຮັບວ່າ “ທຳມະຕັນຫາບໍ່ເປັນທຸກຂະສະມຸໄທ” ແມ່ນບໍ?

ສກ. ແມ່ນ

ປຣ. ຕັນຫານັ້ນເປັນທຳມະຕັນຫາບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກຕັນຫານັ້ນເປັນທຳມະຕັນຫາ ທ່ານກໍຄວນຍອມຮັບວ່າ “ທຳມະຕັນຫາບໍ່ເປັນທຸກຂະສະມຸໄທ”

**ທຳມະຕັນຫານະທຸກຂະສະມຸທະໂຍຕິກະຖາ ຈົບ**

**ເຕນະສະມະວັກ ຈົບ**

## ລວມກະຖາທີ່ມີໃນວັກນີ້ ຄື

໑. ກັບປັດຖະກະຖາ

໒. ອະນັນຕະຣະປະຍຸດຕະກະຖາ

໓. ນິວຸຕະກະຖາ

໗. ສະມາປັນໂນອັດສາເທຕິກະຖາ

໙. ທຳມະຕັນຫາອັບພະຍາກະຕາຕິກະຖາ

໑໐. ທຳມະຕັນຫານະທຸກຂະສະມຸທະໂຍຕິກະຖາ

໔. ກຸສະລະປະຕິລາພະກະຖາ

໕. ນິຍະຕັດສະນິຍາມະກະຖາ

໖. ສຳມຸຂີພູຕະກະຖາ

໘. ອະສາຕະຣາຄະກະຖາ

# ໑໔. ຈຸດທະສະມະວັກ

## ໑. ກຸສະລາກຸສະລະປະຕິສັນທະທະນະກະຖາ (໑໓໖)

### ວ່າດ້ວຍຄວາມສືບຕໍ່ແຫ່ງກຸສົນແລະອະກຸສົນ

[໖໗໖] ສກ. ກຸສົນມູນສືບຕໍ່ອະກຸສົນມູນໄດ້ແມ່ນບໍ?

ປຣ.໑ ແມ່ນ

ສກ. ຄວາມນຶກເຖິງ ຯລຯ ຄວາມຕັ້ງໃຈ ເພື່ອຄວາມເກີດຂຶ້ນແຫ່ງອະກຸສົນນັ້ນກໍເພື່ອຄວາມເກີດຂຶ້ນແຫ່ງກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກຸສົນມູນສືບຕໍ່ອະກຸສົນມູນໄດ້ ແຕ່ທ່ານບໍ່ຍອມຮັບວ່າ "ຄວາມນຶກເຖິງ ຯລຯ ຄວາມຕັ້ງໃຈ ເພື່ອຄວາມເກີດຂຶ້ນແຫ່ງອະກຸສົນນັ້ນ ກໍເພື່ອຄວາມເກີດຂຶ້ນແຫ່ງກຸສົນ" ແມ່ນບໍ?

ປຣ. ແມ່ນ

ສກ. ກຸສົນເກີດຂຶ້ນແກ່ຜູ້ບໍ່ນຶກເຖິງຢູ່ ຯລຯ ບໍ່ຕັ້ງໃຈຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກຸສົນເກີດຂຶ້ນແກ່ຜູ້ນຶກເຖິງຢູ່ ຯລຯ ຕັ້ງໃຈຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກກຸສົນເກີດຂຶ້ນແກ່ຜູ້ນຶກເຖິງຢູ່ ຯລຯ ຕັ້ງໃຈຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ກຸສົນມູນສືບຕໍ່ອະກຸສົນມູນໄດ້"

[໖໗໗] ສກ. ກຸສົນມູນສືບຕໍ່ອະກຸສົນມູນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ອະກຸສົນເກີດຂຶ້ນແກ່ຜູ້ມະນະສິການຢູ່ໂດຍບໍ່ແຍບຄາຍແມ່ນບໍ?

ປຣ. ແມ່ນ

ສກ. ກຸສົນເກີດຂຶ້ນແກ່ຜູ້ມະນະສິການຢູ່ໂດຍບໍ່ແຍບຄາຍແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກຸສົນເກີດຂຶ້ນແກ່ຜູ້ມະນະສິການຢູ່ໂດຍແຍບຄາຍບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກກຸສົນເກີດຂຶ້ນແກ່ຜູ້ມະນະສິການຢູ່ໂດຍແຍບຄາຍ ທ່ານກໍບໍ່ຄວນຍອມຮັບວ່າ "ກຸສົນມູນສືບຕໍ່ອະກຸສົນມູນໄດ້"

ສກ. ກຸສົນມູນສືບຕໍ່ອະກຸສົນມູນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ເນກຂໍາມະສັນຍາເກີດຂຶ້ນໃນລໍາດັບແຫ່ງກາມສັນຍາ ອັບພະຍາປາທະສັນຍາເກີດຂຶ້ນໃນລໍາດັບແຫ່ງພະຍາປາທະສັນຍາ ອະວິຫິງສາສັນຍາເກີດຂຶ້ນໃນລໍາດັບແຫ່ງວິຫິງສາສັນຍາ ເມດຕາເກີດຂຶ້ນໃນລໍາດັບແຫ່ງພະຍາບາດ ກະລຸນາເກີດຂຶ້ນໃນລໍາດັບແຫ່ງວິຫິງສາ ມຸທິຕາເກີດຂຶ້ນ ໃນລໍາດັບແຫ່ງອະຣະຕິ ອຸເປກຂາເກີດຂຶ້ນໃນລໍາດັບແຫ່ງປະຕິຄະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໖໙໙] ສກ. ອະກຸສົນມູນສືບຕໍ່ກຸສົນມູນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມນຶກເຖິງ ຯລຯ ຄວາມຕັ້ງໃຈ ເພື່ອຄວາມເກີດຂຶ້ນແຫ່ງກຸສົນນັ້ນກໍເພື່ອຄວາມເກີດຂຶ້ນແຫ່ງອະກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະກຸສົນມູນສືບຕໍ່ກຸສົນມູນໄດ້ ແຕ່ທ່ານບໍ່ຍອມຮັບວ່າ "ຄວາມນຶກເຖິງ ຯລຯ ຄວາມຕັ້ງໃຈ ເພື່ອຄວາມເກີດຂຶ້ນແຫ່ງກຸສົນນັ້ນ ກໍເພື່ອຄວາມເກີດຂຶ້ນແຫ່ງອະກຸສົນ" ແມ່ນບໍ?

ປຣ. ແມ່ນ

ສກ. ອະກຸສົນເກີດຂຶ້ນແກ່ຜູ້ບໍ່ນຶກເຖິງຢູ່ ຯລຯ ບໍ່ຕັ້ງໃຈຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະກຸສົນເກີດຂຶ້ນແກ່ຜູ້ນຶກເຖິງຢູ່ ຯລຯ ຕັ້ງໃຈຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກອະກຸສົນເກີດຂຶ້ນແກ່ຜູ້ນຶກເຖິງຢູ່ ຯລຯ ຕັ້ງໃຈຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ອະກຸສົນມູນສືບຕໍ່ກຸສົນມູນໄດ້"

[໖໙໑] ສກ. ອະກຸສົນມູນສືບຕໍ່ກຸສົນມູນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ກຸສົນເກີດຂຶ້ນແກ່ຜູ້ມະນະສິການຢູ່ໂດຍແຍບຄາຍແມ່ນບໍ?

ປຣ. ແມ່ນ

ສກ. ອະກຸສົນເກີດຂຶ້ນແກ່ຜູ້ມະນະສິການຢູ່ໂດຍແຍບຄາຍແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະກຸສົນເກີດຂຶ້ນແກ່ຜູ້ມະນະສິການຢູ່ໂດຍບໍ່ແຍບຄາຍບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກອະກຸສົນເກີດຂຶ້ນແກ່ຜູ້ມະນະສິການໂດຍບໍ່ແຍບຄາຍ ທ່ານກໍບໍ່ຄວນຍອມຮັບວ່າ "ອະກຸສົນມູນສືບຕໍ່ກຸສົນມູນໄດ້"

ສກ. ອະກຸສົນມູນສືບຕໍ່ກຸສົນມູນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ການສັນຍາເກີດຂຶ້ນໃນລຳດັບແຫ່ງເນກຂຳມະສັນຍາ ພະຍາປາທະສັນຍາເກີດຂຶ້ນໃນລຳດັບແຫ່ງອັບພະຍາປາທະສັນຍາ ວິຫິງສາສັນຍາເກີດຂຶ້ນໃນລຳດັບແຫ່ງອະວິຫິງສາສັນຍາ ພະຍາບາດເກີດຂຶ້ນໃນລຳດັບແຫ່ງເມດຕາ ວິຫິງສາເກີດຂຶ້ນໃນລຳດັບແຫ່ງກະລຸນາ ອະຣະຕິເກີດຂຶ້ນໃນລຳດັບແຫ່ງມຸທິຕາ ປະຕິຄະເກີດຂຶ້ນໃນລຳດັບແຫ່ງອຸເປກຂາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໖໙໐] ປຣ. ທ່ານບໍ່ຍອມຮັບວ່າ "ກຸສົນມູນສືບຕໍ່ອະກຸສົນມູນໄດ້ ອະກຸສົນມູນສືບຕໍ່ກຸສົນມູນໄດ້" ແມ່ນບໍ?

ສກ. ແມ່ນ

ປຣ. ຈິດຄາຍກຳໜັດໃນວັດຖຸທີ່ຕົນກຳໜັດ ກຳໜັດໃນວັດຖຸທີ່ຕົນຄາຍກຳໜັດເທົ່ານັ້ນບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກຈິດຄາຍກຳໜັດໃນວັດຖຸທີ່ຕົນກຳໜັດ ກຳໜັດໃນວັດຖຸທີ່ຕົນຄາຍກຳໜັດ ດັ່ງນັ້ນທ່ານຈຶ່ງຄວນຍອມຮັບວ່າ "ກຸສົນມູນສືບຕໍ່ອະກຸສົນມູນໄດ້ ອະກຸສົນມູນກໍສືບຕໍ່ກຸສົນ ມູນໄດ້"

**ກຸສະລາກຸສະລະປະຕິສັນທະຫະນະກະຖາ ຈົບ**

## ໘. ສະລາຍະຕະນຸບປັດຕິກະຖາ (໑໘໗)

## ວ່າດ້ວຍຄວາມເກີດຂຶ້ນແຫ່ງອາຍະຕະນະ ໖

[໖໙໑] ສກ. ອາຍະຕະນະ ໖ ເກີດໃນທ້ອງມານດາ ບໍ່ກ່ອນ ບໍ່ຫຼັງກັນແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນມີອະໄວຍະວະນ້ອຍໃຫຍ່ຄົບຖ້ວນ ມີອິນຊີບໍ່ບົກພ່ອງ ຍັ່ງລົງໃນທ້ອງມານດາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈັກຂາຍະຕະນະເກີດພ້ອມກັບປະຕິສົນທິຈິດແມ່ນບໍ?

ປຣ. ແມ່ນ

ສກ. ມື ຂາ ຫົວ ຫູ ດັງ ປາກ ແຂ້ວ ເກີດພ້ອມກັບປະຕິສົນທິຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂສຕາຍະຕະນະ ຯລຯ ຄານາຍະຕະນະ ຯລຯ ຊິວຫາຍະຕະນະເກີດພ້ອມກັບປະຕິສົນທິຈິດແມ່ນບໍ?

ປຣ. ແມ່ນ

ສກ. ມື ຂາ ຫົວ ຫູ ດັງ ປາກ ແຂ້ວ ເກີດພ້ອມກັບປະຕິສົນທິຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໕໗໘] ປຣ. ຈັກຂາຍະຕະນະເກີດຂຶ້ນແກ່ສັດຜູ້ຢູ່ໃນທ້ອງມານດາໃນພາຍຫຼັງ ແມ່ນບໍ?

ສກ. ແມ່ນ

ປຣ. ສັດຜູ້ຢູ່ໃນທ້ອງມານດາເຮັດກຳເພື່ອໄດ້ຈັກຂຸຢູ່ໃນທ້ອງມານດາແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ໂສຕາຍະຕະນະ ຯລຯ ຄານາຍະຕະນະ ຯລຯ ຊິວຫາຍະຕະນະ ເກີດຂຶ້ນແກ່ສັດຜູ້ຢູ່ໃນທ້ອງມານດາໃນພາຍຫຼັງແມ່ນບໍ?

ສກ. ແມ່ນ

ປຣ. ສັດຜູ້ຢູ່ໃນທ້ອງມານດາເຮັດກຳເພື່ອໄດ້ຊິວຫາຢູ່ໃນທ້ອງມານດາແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຜົມ ຂົນ ເລັບ ແຂ້ວ ກະດູກ ເກີດຂຶ້ນແກ່ສັດຜູ້ຢູ່ໃນທ້ອງມານດາໃນພາຍຫຼັງແມ່ນບໍ?

ປຣ. ແມ່ນ

ສກ. ສັດຜູ້ຢູ່ໃນທ້ອງມານດາເຮັດກຳເພື່ອໄດ້ອັດຖິຢູ່ໃນທ້ອງມານດາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ທ່ານບໍ່ຍອມຮັບວ່າ "ຜົມ ຂົນ ເລັບ ແຂ້ວ ກະດູກ ເກີດຂຶ້ນແກ່ສັດຜູ້ຢູ່ໃນທ້ອງມານດາໃນພາຍຫຼັງ" ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ຮູບນີ້ເປັນກະລະລະກ່ອນ
ຈາກກະລະລະເກີດເປັນອັບພຸຕະ
ຈາກອັບພຸຕະເກີດເປັນເປສີ
ຈາກເປສີເກີດເປັນຄະນະ
ຈາກຄະນະເກີດເປັນປຸ່ມ ໕ ປຸ່ມ
ຕໍ່ຈາກນັ້ນ ຜົມ ຂົນ ເລັບຈຶ່ງເກີດຂຶ້ນ
ມານດາຂອງສັດຜູ້ຢູ່ໃນທ້ອງນັ້ນ
ບໍຣິໂພກເຂົ້າ ນໍ້າ ໂພຊະນາຫານແນວໃດ

ສັດຜູ້ຢູ່ໃນທ້ອງມານດານັ້ນ
ກໍຍັງອັດຕະພາບໃຫ້ເປັນໄປໃນທ້ອງ
ດ້ວຍເຂົ້າ ນໍ້າ ໂພຊະນາຫານແນວນັ້ນ"

ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ຜົມ ຂົນ ເລັບ ແຂ້ວ ກະດູກ ຈຶ່ງເກີດຂຶ້ນແກ່ສັດຜູ້ຢູ່ໃນທ້ອງມານດາໃນພາຍຫຼັງ

**ສະລາຍະຕະນຸບປັດຕິກະຖາ ຈົບ**

## ໓. ອະນັນຕະຣະປັດຈະຍະກະຖາ (໑໓໗)

## ວ່າດ້ວຍອະນັນຕະຣະປັດໄຈ

[໖໙໓] ສກ. ໂສຕະວິນຍານເກີດຂຶ້ນໃນລຳດັບແຫ່ງຈັກຂຸວິນຍານແມ່ນບໍ?

ປຣ. ແມ່ນ

ສກ. ຄວາມນຶກເຖິງ ฯລฯ ຄວາມຕັ້ງໃຈ ເພື່ອຄວາມເກີດຂຶ້ນແຫ່ງຈັກຂຸວິນຍານນັ້ນ ກໍເພື່ອຄວາມເກີດຂຶ້ນແຫ່ງໂສຕະວິນຍານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ໂສຕະວິນຍານເກີດຂຶ້ນໃນລຳດັບແຫ່ງຈັກຂຸວິນຍານ ແຕ່ທ່ານບໍ່ຍອມຮັບວ່າ "ຄວາມນຶກເຖິງ ฯລฯ ຄວາມຕັ້ງໃຈ ເພື່ອຄວາມເກີດຂຶ້ນແຫ່ງຈັກຂຸວິນຍານນັ້ນກໍເພື່ອຄວາມເກີດຂຶ້ນແຫ່ງໂສຕະວິນຍານ" ແມ່ນບໍ?

ປຣ. ແມ່ນ

ສກ. ໂສຕະວິນຍານເກີດຂຶ້ນແກ່ຜູ້ບໍ່ນຶກເຖິງຢູ່ ฯລฯ ບໍ່ຕັ້ງໃຈຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ໂສຕະວິນຍານເກີດຂຶ້ນແກ່ຜູ້ນຶກເຖິງຢູ່ ฯລฯ ຕັ້ງໃຈຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກໂສຕະວິນຍານເກີດຂຶ້ນແກ່ຜູ້ນຶກເຖິງຢູ່ ฯລฯ ຕັ້ງໃຈຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ໂສຕະວິນຍານເກີດຂຶ້ນໃນລຳດັບແຫ່ງຈັກຂຸວິນຍານ"

[໖໙໔] ສກ. ໂສຕະວິນຍານເກີດຂຶ້ນໃນລຳດັບແຫ່ງຈັກຂຸວິນຍານແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂຸວິນຍານເກີດຂຶ້ນແກ່ຜູ້ມະນະສິການຮູບນິມິດແມ່ນບໍ?

ປຣ. ແມ່ນ

ສກ. ໂສຕະວິນຍານເກີດຂຶ້ນແກ່ຜູ້ມະນະສິການຮູບນິມິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈັກຂຸວິນຍານມີຮູບເປັນອາລົມເທົ່ານັ້ນ ບໍ່ມີຢ່າງອື່ນເປັນອາລົມແມ່ນບໍ?

ປຣ. ແມ່ນ

ສກ. ໂສຕະວິນຍານມີຮູບເປັນອາລົມເທົ່ານັ້ນ ບໍ່ມີຢ່າງອື່ນເປັນອາລົມແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຍ້ອນອາໄສຈັກຂຸແລະຮູບ ຈັກຂຸວິນຍານຈຶ່ງເກີດຂຶ້ນແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນອາໄສຈັກຂຸແລະຮູບ ໂສຕະວິນຍານຈຶ່ງເກີດຂຶ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຍ້ອນອາໄສຈັກຂຸແລະຮູບ ໂສຕະວິນຍານຈຶ່ງເກີດຂຶ້ນແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ວ່າ "ຍ້ອນອາໄສຈັກຂຸແລະຮູບ ໂສຕະວິນຍານຈຶ່ງເກີດຂຶ້ນ" ມີຢູ່ຈິງແມ່ນບໍ?

ປຣ. ບໍ່ມີ

ສກ. ພຣະສູດທີ່ວ່າ "ຍ້ອນອາໄສຈັກຂຸແລະຮູບ ຈັກຂຸວິນຍານຈຶ່ງເກີດຂຶ້ນ" ມີຢູ່ຈິງແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະສູດທີ່ວ່າ "ຍ້ອນອາໄສຈັກຂຸກັບຮູບ ຈັກຂຸວິນຍານຈຶ່ງເກີດຂຶ້ນ" ມີຢູ່ຈິງ ທ່ານກໍບໍ່ຄວນຍອມຮັບວ່າ "ຍ້ອນອາໄສຈັກຂຸແລະຮູບ ໂສຕະວິນຍານຈຶ່ງເກີດຂຶ້ນ"

ສກ. ໂສຕະວິນຍານເກີດຂຶ້ນໃນລຳດັບແຫ່ງຈັກຂຸວິນຍານແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂຸວິນຍານກັບໂສຕະວິນຍານເປັນແນວດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໖໙໕] ສກ. ຄານະວິນຍານເກີດຂຶ້ນໃນລຳດັບແຫ່ງໂສຕະວິນຍານ ຯລຯ ຊິວຫາວິນຍານເກີດຂຶ້ນໃນລຳດັບແຫ່ງຄານະວິນຍານ ຯລຯ ກາຍວິນຍານເກີດຂຶ້ນໃນລຳດັບແຫ່ງຊິວຫາວິນຍານແມ່ນບໍ?

ປຣ. ແມ່ນ

ສກ. ຄວາມນຶກເຖິງ ຯລຯ ຄວາມຕັ້ງໃຈ ເພື່ອຄວາມເກີດຂຶ້ນແຫ່ງຊິວຫາວິນຍານນັ້ນກໍເພື່ອຄວາມເກີດຂຶ້ນແຫ່ງກາຍວິນຍານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກາຍວິນຍານເກີດຂຶ້ນໃນລຳດັບແຫ່ງຊິວຫາວິນຍານ ແຕ່ທ່ານບໍ່ຍອມຮັບວ່າ "ຄວາມນຶກເຖິງ ຯລຯ ຄວາມຕັ້ງໃຈ ເພື່ອຄວາມເກີດຂຶ້ນແຫ່ງຊິວຫາວິນຍານນັ້ນກໍເພື່ອຄວາມເກີດຂຶ້ນແຫ່ງກາຍວິນຍານ" ແມ່ນບໍ?

ປຣ. ແມ່ນ

ສກ. ກາຍວິນຍານເກີດຂຶ້ນແກ່ຜູ້ບໍ່ນຶກເຖິງຢູ່ ຯລຯ ບໍ່ຕັ້ງໃຈຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກາຍວິນຍານເກີດຂຶ້ນແກ່ຜູ້ນຶກເຖິງຢູ່ ຯລຯ ຕັ້ງໃຈຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກກາຍວິນຍານເກີດຂຶ້ນແກ່ຜູ້ນຶກເຖິງຢູ່ ຯລຯ ຜູ້ຕັ້ງໃຈຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ກາຍວິນຍານເກີດຂຶ້ນໃນລຳດັບແຫ່ງຊິວຫາວິນຍານ"

[໖໙໖] ສກ. ກາຍວິນຍານເກີດຂຶ້ນໃນລຳດັບແຫ່ງຊິວຫາວິນຍານແມ່ນບໍ?

ປຣ. ແມ່ນ

ສກ. ຊິວຫາວິນຍານເກີດຂຶ້ນແກ່ຜູ້ມະນະສິການຣົດນິມິດແມ່ນບໍ?

ປຣ. ແມ່ນ

ສກ. ກາຍວິນຍານເກີດຂຶ້ນແກ່ຜູ້ມະນະສິການຣົດນິມິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຊິວຫາວິນຍານມີຣົດເປັນອາລົມເທົ່ານັ້ນ ບໍ່ມີຢ່າງອື່ນເປັນອາລົມແມ່ນບໍ?

ປຣ. ແມ່ນ

ສກ. ກາຍວິນຍານມີຣົດເປັນອາລົມເທົ່ານັ້ນ ບໍ່ມີຢ່າງອື່ນເປັນອາລົມແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຍ້ອນອາໄສຊິວຫາແລະຣົດ ຊິວຫາວິນຍານຈຶ່ງເກີດຂຶ້ນແມ່ນບໍ?

ປຣ. ແມ່ນ

ສກ. ຍ້ອນອາໄສຊິວຫາແລະຣົດ ກາຍວິນຍານຈຶ່ງເກີດຂຶ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຍ້ອນອາໄສຊິວຫາແລະຣົດ ກາຍວິນຍານຈຶ່ງເກີດຂຶ້ນແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ວ່າ "ຍ້ອນອາໄສຊິວຫາແລະຣົດ ກາຍວິນຍານຈຶ່ງເກີດຂຶ້ນ" ມີຢູ່ແມ່ນບໍ?

ປຣ. ບໍ່ມີ

ສກ. ພຣະສູດທີ່ວ່າ "ຍ້ອນອາໄສຊິວຫາແລະຣົດ ຊິວຫາວິນຍານຈຶ່ງເກີດຂຶ້ນ" ມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະສູດທີ່ວ່າ "ຍ້ອນອາໄສຊິວຫາແລະຣົດ ຊິວຫາວິນຍານຈຶ່ງເກີດຂຶ້ນ" ມີຢູ່ຈິງ ທ່ານກໍບໍ່ຄວນຍອມຮັບວ່າ "ຍ້ອນອາໄສຊິວຫາແລະຣົດ ກາຍວິນຍານຈຶ່ງເກີດຂຶ້ນ"

ສກ. ກາຍວິນຍານເກີດຂຶ້ນໃນລຳດັບແຫ່ງຊິວຫາວິນຍານແມ່ນບໍ?

ປຣ. ແມ່ນ

ສກ. ຊິວຫາວິນຍານກັບກາຍວິນຍານເປັນແນວດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໖໙໗] ປຣ. ທ່ານບໍ່ຍອມຮັບວ່າ "ວິນຍານ ໕ ເກີດຂຶ້ນຕໍ່ເນື່ອງກັນແລະກັນ" ແມ່ນບໍ?

ສກ. ແມ່ນ

ປຣ. ບາງຄົນທີ່ຟ້ອນລຳ ຂັບຮ້ອງ ປະໂຄມດົນຕີ ເຫັນຮູບ ຟັງສຽງ ດົມກິ່ນ ຊີມຣົດ ແລະຖືກຕ້ອງໂຜດຖັບພະມີຢູ່ບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກບາງຄົນທີ່ຟ້ອນລຳ ຂັບຮ້ອງ ປະໂຄມດົນຕີ ເຫັນຮູບ ຟັງສຽງ ດົມກິ່ນ ຊີມຣົດ ແລະຖືກຕ້ອງໂຜດຖັບພະໄດ້ມີຢູ່ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ວິນຍານ ໕ ເກີດຂຶ້ນຕໍ່ເນື່ອງກັນແລະກັນ"

**ອະນັນຕະຣະປັດຈະຍະກະຖາ ຈົບ**

## ໔. ອະຣິຍະຣູປະກະຖາ (໑໓໙)

## ວ່າດ້ວຍອະຣິຍະຣູບ

[໖໙໘] ສກ. ອະຣິຍະຣູບອາໄສມະຫາພູຕະຣູບແມ່ນບໍ?

ປຣ. ແມ່ນ

ສກ. ອະຣິຍະຣູບເປັນກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ມະຫາພູຕະຣູບເປັນກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ມະຫາພູຕະຣູບເປັນອັບພະຍາກະຕະແມ່ນບໍ?

ປຣ. ແມ່ນ

ສກ. ອະຣິຍະຣູບເປັນອັບພະຍາກະຕະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະຣິຍະຣູບອາໄສມະຫາພູຕະຣູບແມ່ນບໍ?

ປຣ. ແມ່ນ

ສກ. ອະຣິຍະຣູບບໍ່ເປັນອາລົມຂອງອາສະວະ ບໍ່ເປັນອາລົມຂອງສັງໂຍດ ບໍ່ເປັນອາລົມຂອງຄັນຖະ ບໍ່ເປັນອາລົມຂອງໂອຄະ ບໍ່ເປັນອາລົມຂອງໂຍຄະ ບໍ່ເປັນອາລົມຂອງນິວອນ ບໍ່ເປັນອາລົມຂອງປະຣາມາດ ບໍ່ເປັນອາລົມຂອງອຸປາທານ ບໍ່ເປັນອາລົມຂອງສັງກິເລດແມ່ນບໍ?

ປຣ. ແມ່ນ

ສກ. ມະຫາພູຕະຣູບບໍ່ເປັນອາລົມຂອງອາສະວະ ຯລຯ ບໍ່ເປັນອາລົມຂອງສັງກິເລດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ມະຫາພູຕະຣູບເປັນອາລົມຂອງອາສະວະ ເປັນອາລົມຂອງສັງໂຍດ ຯລຯ ເປັນອາລົມຂອງສັງກິເລດແມ່ນບໍ?

ປຣ. ແມ່ນ

ສກ. ອະຣິຍະຣູບເປັນອາລົມຂອງອາສະວະ ເປັນອາລົມຂອງສັງໂຍດ ເປັນອາລົມຂອງສັງກິເລດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໖໙໙] ປຣ. ທ່ານບໍ່ຍອມຮັບວ່າ "ອະຣິຍະຣູບອາໄສມະຫາພູຕະຣູບ" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ຣູບແນວໃດແນວໜຶ່ງຄື ມະຫາພູຕະຣູບ ໔ ແລະຣູບທີ່ອາໄສມະຫາພູຕະຣູບ ໔" ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ອະຣິຍະຣູບຈຶ່ງອາໄສມະຫາພູຕະຣູບ

**ອະຣິຍະຣູປະກະຖາ ຈົບ**

# ໕. ອັນໂຍອະນຸສະໂຍຕິກະຖາ (໑໔໐)

## ວ່າດ້ວຍອະນຸໄສເປັນຄົນລະຢ່າງກັນ (ກັບປະຣິຍຸດຖານກິເລດ)

[໗໐໐] ສກ. ກາມຣາຄານຸໄສກັບກາມຣາຄະປະຣິຍຸດຖານເປັນຄົນລະຢ່າງກັນແມ່ນບໍ?

ປຣ. ແມ່ນ

ສກ. ກາມຣາຄະກັບກາມຣາຄະປະຣິຍຸດຖານເປັນຄົນລະຢ່າງກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກາມຣາຄະກັບກາມຣາຄະປະຣິຍຸດຖານເປັນແນວດຽວກັນແມ່ນບໍ?

ປຣ. ແມ່ນ

ສກ. ການຣາຄານຸໄສກັບການຣາຄະປະຣິຍຸດຖານເປັນແນວດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ປະຕິຄານຸໄສກັບປະຕິຄະປະຣິຍຸດຖານເປັນຄົນລະຢ່າງກັນແມ່ນບໍ?

ປຣ. ແມ່ນ

ສກ. ປະຕິຄະກັບປະຕິຄະປະຣິຍຸດຖານເປັນຄົນລະຢ່າງກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ປະຕິຄະກັບປະຕິຄະປະຣິຍຸດຖານເປັນແນວດຽວກັນແມ່ນບໍ?

ປຣ. ແມ່ນ

ສກ. ປະຕິຄານຸໄສກັບປະຕິຄະປະຣິຍຸດຖານເປັນແນວດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ມານານຸໄສກັບມານະປະຣິຍຸດຖານເປັນຄົນລະຢ່າງກັນແມ່ນບໍ?

ປຣ. ແມ່ນ

ສກ. ມານະກັບມານະປະຣິຍຸດຖານເປັນຄົນລະຢ່າງກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ມານະກັບມານະປະຣິຍຸດຖານເປັນແນວດຽວກັນແມ່ນບໍ?

ປຣ. ແມ່ນ

ສກ. ມານານຸໄສກັບມານະປະຣິຍຸດຖານເປັນແນວດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ທິດຖານຸໄສກັບທິດຖິປະຣິຍຸດຖານເປັນຄົນລະຢ່າງກັນແມ່ນບໍ?

ປຣ. ແມ່ນ

ສກ. ທິດຖິກັບທິດຖິປະຣິຍຸດຖານເປັນຄົນລະຢ່າງກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ທິດຖິກັບທິດຖິປະຣິຍຸດຖານເປັນແນວດຽວກັນແມ່ນບໍ?

ປຣ. ແມ່ນ

ສກ. ທິດຖານຸໄສກັບທິດຖິປະຣິຍຸດຖານເປັນແນວດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວິຈິກິດສານຸໄສກັບວິຈິກິດສາປະຣິຍຸດຖານເປັນຄົນລະຢ່າງກັນແມ່ນບໍ?

ປຣ. ແມ່ນ

ສກ. ວິຈິກິດສາກັບວິຈິກິດສາປະຣິຍຸດຖານເປັນຄົນລະຢ່າງກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວິຈິກິດສາກັບວິຈິກິດສາປະຣິຍຸດຖານເປັນແນວດຽວກັນແມ່ນບໍ?

ປຣ. ແມ່ນ

ສກ. ວິຈິກິດສານຸໄສກັບວິຈິກິດສາປະຣິຍຸດຖານເປັນແນວດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພະວະຣາຄານຸໄສກັບພະວະຣາຄະປະຣິຍຸດຖານເປັນຄົນລະຢ່າງກັນແມ່ນບໍ?

ປຣ. ແມ່ນ

ສກ. ພະວະຣາຄະກັບພະວະຣາຄະປະຣິຍຸດຖານເປັນຄົນລະຢ່າງກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພະວະຣາຄະກັບພະວະຣາຄະປະຣິຍຸດຖານເປັນແນວດຽວກັນແມ່ນບໍ?

ປຣ. ແມ່ນ

ສກ. ພະວະຣາຄານຸໄສກັບພະວະຣາຄະປະຣິຍຸດຖານເປັນແນວດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະວິດຊານຸໄສກັບອະວິດຊາປະຣິຍຸດຖານເປັນຄົນລະຢ່າງກັນແມ່ນບໍ?

ປຣ. ແມ່ນ

ສກ. ອະວິດຊາກັບອະວິດຊາປະຣິຍຸດຖານເປັນຄົນລະຢ່າງກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະວິດຊາກັບອະວິດຊາປະຣິຍຸດຖານເປັນແນວດຽວກັນແມ່ນບໍ?

ປຣ. ແມ່ນ

ສກ. ອະວິດຊານຸໄສກັບອະວິດຊາປະຣິຍຸດຖານເປັນແນວດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໐໑] ປຣ. ທ່ານບໍ່ຍອມຮັບວ່າ "ອະນຸໄສກັບປະຣິຍຸດຖານກິເລດເປັນຄົນລະຢ່າງກັນ" ແມ່ນບໍ?

ສກ. ແມ່ນ

ປຣ. ປຸຖຸຊົນ ເມື່ອຈິດທີ່ເປັນກຸສົນແລະທີ່ເປັນອັບພະຍາກະຕະເປັນໄປຢູ່ ທ່ານຍອມຮັບວ່າ "ມີອະນຸໄສ" ແມ່ນບໍ?

ສກ. ແມ່ນ

ປຣ. ທ່ານຍອມຮັບວ່າ "ຖືກປະຣິຍຸດຖານກິເລດກຸ້ມຣຸມ" ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ດັ່ງນັ້ນ ອະນຸໄສກັບປະຣິຍຸດຖານກິເລດຈຶ່ງເປັນຄົນລະຢ່າງກັນ

ປຣ. ປຸຖຸຊົນ ເມື່ອຈິດທີ່ເປັນກຸສົນແລະທີ່ເປັນອັບພະຍາກະຕະເປັນໄປຢູ່ ທ່ານຍອມຮັບວ່າ "ມີຣາຄະ" ແມ່ນບໍ?

ສກ. ແມ່ນ

ປຣ. ທ່ານຍອມຮັບວ່າ "ຖືກປະຣິຍຸດຖານກິເລດກຸ້ມຮຸມ" ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ດັ່ງນັ້ນ ຣາຄະກັບປະຣິຍຸດຖານກິເລດຈຶ່ງເປັນຄົນລະຢ່າງກັນ

**ອັນໂຍອະນຸສະໂຍຕິກະຖາ ຈົບ**

# ຝ. ປະຣິຍຸດຖານັງຈິດຕະວິບປະຍຸດຕັນຕິກະຖາ (໑໔໑)

## ວ່າດ້ວຍປະຣິຍຸດຖານກິເລດວິບປະຍຸດຈາກຈິດ

[໗໐໔] ສກ. ປະຣິຍຸດຖານກິເລດວິບປະຍຸດຈາກຈິດແມ່ນບໍ?

ປຣ. ແມ່ນ

ສກ. ປະຣິຍຸດຖານກິເລດເປັນຮູບ ເປັນນິບພານ ເປັນຈັກຂາຍະຕະນະຯລຯ ເປັນໂຜດຖັບພາຍະຕະນະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ປະຣິຍຸດຖານກິເລດວິບປະຍຸດຈາກຈິດແມ່ນບໍ?

ປຣ. ແມ່ນ

ສກ. ຈິດມີຣາຄະ ມີໂທສະ ມີໂມຫະ ຯລຯ ຈິດເປັນອະກຸສົນ ຈິດເສົ້າໝອງບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈິດມີຣາຄະ ມີໂທສະ ມີໂມຫະ ຯລຯ ຈິດເປັນອະກຸສົນ ຈິດເສົ້າໝອງມີຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຈິດມີຣາຄະ ມີໂທສະ ມີໂມຫະ ຯລຯ ຈິດເປັນອະກຸສົນ ຈິດເສົ້າໝອງມີຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ປະຣິຍຸດຖານກິເລດວິບປະຍຸດຈາກຈິດ"

**ປະຣິຍຸດຖານັງຈິດຕະວິບປະຍຸດຕັນຕິກະຖາ ຈົບ**

# ກ. ປະຣິຍາປັນນະກະຖາ (໑໔໘)

## ວ່າດ້ວຍທຳທີ່ນັບເນື່ອງ (ວັດຕະທຸກ)

[໗໐໕] ສກ. ຮູບປະຣາຄະນອນເນື່ອງຢູ່ໃນຮູບທາດ ນັບເນື່ອງໃນຮູບທາດແມ່ນບໍ?

ປຣ. ແມ່ນ

ສກ. ຮູບປະຣາຄະເປັນເຄື່ອງສະແຫວງຫາສະມາບັດ ເປັນເຄື່ອງສະແຫວງຫາອຸບັດ ເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ປະກອບ ເກີດຮ່ວມ ຜະສົມ ສໍາປະຍຸດ ເກີດພ້ອມກັນ ດັບພ້ອມກັນ ມີວັດຖຸແນວດຽວກັນ ມີອາລົມແນວດຽວກັນກັບຈິດດວງທີ່ເປັນເຄື່ອງສະແຫວງຫາສະມາບັດ ດວງທີ່ເປັນເຄື່ອງສະແຫວງຫາອຸບັດ ດວງທີ່ເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບປະຣາຄະບໍ່ເປັນເຄື່ອງສະແຫວງຫາສະມາບັດ ບໍ່ເປັນເຄື່ອງສະແຫວງຫາອຸບັດ ບໍ່ເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ປະກອບ ເກີດຮ່ວມ ຜະສົມ ສໍາປະຍຸດ ເກີດພ້ອມກັນ ດັບພ້ອມກັນ ມີວັດຖຸແນວດຽວກັນ ມີອາລົມແນວດຽວກັນກັບຈິດດວງທີ່ບໍ່ເປັນເຄື່ອງສະແຫວງຫາສະມາບັດ ດວງທີ່ບໍ່ເປັນເຄື່ອງສະແຫວງຫາອຸບັດ ດວງທີ່ບໍ່ເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຮູບປະຣາຄະບໍ່ເປັນເຄື່ອງສະແຫວງຫາສະມາບັດ ບໍ່ເປັນເຄື່ອງສະແຫວງຫາອຸບັດ ບໍ່ເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ຯລຯ ມີອາລົມແນວດຽວກັນ ຯລຯ ທ່ານກໍບໍ່ຄວນຍອມຮັບວ່າ "ຮູບປະຣາຄະນອນເນື່ອງຢູ່ໃນຮູບທາດ ນັບເນື່ອງໃນຮູບທາດ" ຯລຯ

ສກ. ຮູບປະຣາຄະນອນເນື່ອງຢູ່ໃນຮູບທາດ ນັບເນື່ອງໃນຮູບທາດແມ່ນບໍ?

ປຣ. ແມ່ນ

ສກ. ສັດທະຣາຄະນອນເນື່ອງຢູ່ໃນສັດທະທາດ ນັບເນື່ອງໃນສັດທະທາດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບປະຣາຄະນອນເນື່ອງຢູ່ໃນຮູບທາດ ນັບເນື່ອງໃນຮູບທາດແມ່ນບໍ?

ປຣ. ແມ່ນ

ສກ. ຄັນທະຣາຄະ ຯລຯ ຣະສະຣາຄະ ຯລຯ ໂຜດຖັບພະຣາຄະ ນອນເນື່ອງຢູ່ໃນໂຜດຖັບພະທາດ ນັບເນື່ອງໃນໂຜດຖັບພະທາດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສັດທະຣາຄະນອນເນື່ອງຢູ່ໃນສັດທະທາດ ແຕ່ທ່ານບໍ່ຍອມຮັບວ່າ "ນັບເນື່ອງໃນສັດທະທາດ" ແມ່ນບໍ?

ປຣ. ແມ່ນ

ສກ. ຮູບປະຣາຄະນອນເນື່ອງຢູ່ໃນຮູບທາດ ແຕ່ທ່ານບໍ່ຍອມຮັບວ່າ "ນັບເນື່ອງໃນຮູບທາດ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄັນທະຣາຄະ ຯລຯ ຣະສະຣາຄະ ຯລຯ ໂຜດຖັບພະຣາຄະ ນອນເນື່ອງຢູ່ໃນໂຜດຖັບພະທາດ ແຕ່ທ່ານບໍ່ຍອມຮັບວ່າ "ນັບເນື່ອງໃນໂຜດຖັບພະທາດ" ແມ່ນບໍ?

ປຣ. ແມ່ນ

ສກ. ຮູບປະຣາຄະນອນເນື່ອງຢູ່ໃນຮູບທາດ ແຕ່ທ່ານບໍ່ຍອມຮັບວ່າ "ນັບເນື່ອງໃນຮູບທາດ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໐໘] ສກ. ອະຮູບປະຣາຄະນອນເນື່ອງຢູ່ໃນອະຮູບທາດ ນັບເນື່ອງໃນອະຮູບທາດແມ່ນບໍ?

ປຣ. ແມ່ນ

ສກ. ອະຮູບປະຣາຄະເປັນເຄື່ອງສະແຫວງຫາສະມາບັດ ເປັນເຄື່ອງສະແຫວງຫາອຸບັດ ເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ປະກອບ ເກີດຮ່ວມ ຜະສົມ ສຳປະຍຸດ ເກີດພ້ອມກັນ ດັບພ້ອມກັນ ມີວັດຖຸແນວດຽວກັນ ມີອາລົມແນວດຽວກັນກັບຈິດດວງທີ່ເປັນເຄື່ອງສະແຫວງຫາສະມາບັດ ດວງທີ່ເປັນເຄື່ອງສະແຫວງຫາອຸບັດ ດວງທີ່ເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະຮູບປະຣາຄະບໍ່ເປັນເຄື່ອງສະແຫວງຫາສະມາບັດ ບໍ່ເປັນເຄື່ອງສະແຫວງຫາອຸບັດ ບໍ່ເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ຯລຯ ມີອາລົມແນວດຽວກັນກັບຈິດດວງທີ່ບໍ່ເປັນເຄື່ອງສະແຫວງຫາສະມາບັດບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກອະຮູບປະຣາຄະບໍ່ເປັນເຄື່ອງສະແຫວງຫາສະມາບັດ ບໍ່ເປັນເຄື່ອງສະແຫວງຫາອຸບັດ ຯລຯ ມີອາລົມແນວດຽວກັນ ທ່ານກໍບໍ່ຍອມຮັບວ່າ "ອະຮູບປະຣາຄະນອນເນື່ອງຢູ່ໃນອະຮູບທາດ ນັບເນື່ອງໃນອະຮູບທາດ"

ສກ. ອະຮູບປະຣາຄະນອນເນື່ອງຢູ່ໃນອະຮູບທາດ ນັບເນື່ອງໃນອະຮູບທາດແມ່ນບໍ?

ປຣ. ແມ່ນ

ສກ. ສັດທະຣາຄະນອນເນື່ອງຢູ່ໃນສັດທະທາດ ນັບເນື່ອງໃນສັດທະທາດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະຮູບປະຣາຄະນອນເນື່ອງຢູ່ໃນອະຮູບທາດ ນັບເນື່ອງໃນອະຮູບທາດແມ່ນບໍ?

ປຣ. ແມ່ນ

ສກ. ຄັນທະຣາຄະ ຯລຯ ຣະສະຣາຄະ ຯລຯ ໂຜດຖັບພະຣາຄະ ນອນເນື່ອງຢູ່ໃນໂຜດຖັບພະທາດ ນັບເນື່ອງໃນໂຜດຖັບພະທາດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສັດທະຣາຄະນອນເນື່ອງຢູ່ໃນສັດທະທາດ ແຕ່ທ່ານບໍ່ຍອມຮັບວ່າ "ນັບເນື່ອງໃນສັດທະທາດ" ແມ່ນບໍ?

ປຣ. ແມ່ນ

ສກ. ອະຮູບປະຣາຄະນອນເນື່ອງຢູ່ໃນອະຮູບທາດ ແຕ່ທ່ານບໍ່ຍອມຮັບວ່າ "ນັບເນື່ອງໃນອະຮູບທາດ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄັນທະຣາຄະ ຯລຯ ຣະສະຣາຄະ ຯລຯ ໂຜດຖັບພະຣາຄະ ນອນເນື່ອງຢູ່ໃນໂຜດຖັບພະທາດ ແຕ່ທ່ານບໍ່ຍອມຮັບວ່າ "ນັບເນື່ອງໃນໂຜດຖັບພະທາດ" ແມ່ນບໍ?

ປຣ. ແມ່ນ

ສກ. ອະຣູບປະຣາຄະນອນເນື່ອງຢູ່ໃນອະຣູບທາດ ແຕ່ທ່ານບໍ່ຍອມຮັບວ່າ "ນັບເນື່ອງໃນອະຣູບທາດ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໐໕] ປຣ. ທ່ານບໍ່ຍອມຮັບວ່າ "ຣູບປະຣາຄະນອນເນື່ອງຢູ່ໃນຣູບທາດ ນັບເນື່ອງໃນຣູບທາດ ອະຣູບປະຣາຄະນອນເນື່ອງຢູ່ໃນອະຣູບທາດ ນັບເນື່ອງໃນອະຣູບທາດ" ແມ່ນບໍ?

ສກ. ແມ່ນ

ປຣ. ກາມຣາຄະນອນເນື່ອງຢູ່ໃນກາມທາດ ນັບເນື່ອງໃນກາມທາດບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກກາມຣາຄະ ນອນເນື່ອງຢູ່ໃນກາມທາດ ນັບເນື່ອງໃນກາມທາດ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ຣູບປະຣາຄະນອນເນື່ອງຢູ່ໃນຣູບທາດ ນັບເນື່ອງໃນຣູບທາດ ອະຣູບປະຣາຄະນອນເນື່ອງຢູ່ໃນອະຣູບທາດ ນັບເນື່ອງໃນອະຣູບທາດ"

**ປະຣິຍາປັນນະກະຖາ ຈົບ**

# ໗. ອັບພະຍາກະຕະກະຖາ (໑໔໖)

## ວ່າດ້ວຍອັບພະຍາກະຕະ

[໗໐໖] ສກ. ທິດຖິເປັນອັບພະຍາກະຕະແມ່ນບໍ?

ປຣ. ແມ່ນ

ສກ. ທິດຖິເປັນອັບພະຍາກະຕະຝ່າຍວິບາກ ເປັນອັບພະຍາກະຕະຝ່າຍກິຣິຍາ ເປັນຣູບ ເປັນນິບພານ ເປັນຈັກຂາຍະຕະນະ ຯລຯ ເປັນໂຜດຖັບພາຍະຕະນະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ທິດຖິເປັນອັບພະຍາກະຕະແມ່ນບໍ?

ປຣ. ແມ່ນ

ສກ. ຜັດສະທີ່ສຳປະຍຸດດ້ວຍທິດຖິເປັນອັບພະຍາກະຕະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ທິດຖິເປັນອັບພະຍາກະຕະແມ່ນບໍ?

ປຣ. ແມ່ນ

ສກ. ເວທະນາທີ່ສຳປະຍຸດດ້ວຍທິດຖິ ຯລຯ ສັນຍາ ຯລຯ ເຈຕະນາ ຯລຯ ຈິດທີ່ສຳປະຍຸດດ້ວຍທິດຖິ ເປັນອັບພະຍາກະຕະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຜັດສະທີ່ສຳປະຍຸດດ້ວຍທິດຖິເປັນອະກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ທິດຖິເປັນອະກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເວທະນາທີ່ສຳປະຍຸດດ້ວຍທິດຖິ ຯລຯ ສັນຍາ ຯລຯ ເຈຕະນາ ຯລຯ ຈິດທີ່ສຳປະຍຸດດ້ວຍທິດຖິ ເປັນອະກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ທິດຖິເປັນອະກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໐໗] ສກ. ທິດຖິເປັນອັບພະຍາກະຕະແມ່ນບໍ?

ປຣ. ແມ່ນ

ສກ. ທິດຖິບໍ່ມີຜົນບໍ່ມີວິບາກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ທິດຖິມີຜົນມີວິບາກບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກທິດຖິມີຜົນມີວິບາກ ທ່ານກໍບໍ່ຄວນຍອມຮັບວ່າ “ທິດຖິເປັນອັບພະຍາກະຕະ”

ສກ. ທິດຖິເປັນອັບພະຍາກະຕະແມ່ນບໍ?

ປຣ. ແມ່ນ

ສກ. ໂທດທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຕັດວ່າ “ມີມິດສາທິດຖິເປັນຢ່າງຍິ່ງ” ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກໂທດທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຕັດວ່າ “ມີມິດສາທິດຖິເປັນຢ່າງຍິ່ງ” ທ່ານກໍບໍ່ຄວນຍອມຮັບວ່າ “ທິດຖິເປັນອັບພະຍາກະຕະ”

ສກ. ທິດຖິເປັນອັບພະຍາກະຕະແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ “ວັດສະມິດສາທິດຖິແລເປັນອະກຸສົນ ສຳມາທິດຖິເປັນກຸສົນ” ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ທິດຖິເປັນອັບພະຍາກະຕະ"

ສກ. ທິດຖິເປັນອັບພະຍາກະຕະແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ປຸນນະເຮົາກ່າວວ່າຄະຕິຂອງຄົນຜູ້ເປັນມິດສາທິດຖິມີ ໒ ຢ່າງ ຄື ນະຮົກຫຼືກຳເນີດສັດເດຍຣັດສານ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານກໍບໍ່ຄວນຍອມຮັບວ່າ "ທິດຖິເປັນອັບພະຍາກະຕະ"

[໗໐໘] ປຣ. ທ່ານບໍ່ຍອມຮັບວ່າ "ທິດຖິເປັນອັບພະຍາກະຕະ" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ວັດສະ ຄຳວ່າ ໂລກທ່ຽງ ນີ້ເຮົາບໍ່ພະຍາກອນ ຄຳວ່າ ໂລກບໍ່ທ່ຽງ ນີ້ເຮົາບໍ່ພະຍາກອນ ຄຳວ່າ ໂລກມີບ່ອນສຸດ ຯລຯ ຄຳວ່າ ໂລກບໍ່ມີບ່ອນສຸດ ຯລຯ ຄຳວ່າ ຊີວະກັບສະຣີຣະເປັນແນວດຽວກັນ ຯລຯ ຄຳວ່າ ຊີວະກັບສະຣີຣະເປັນຄົນລະແນວກັນ ຯລຯ ຄຳວ່າ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກ ຯລຯ ຄຳວ່າ ຫຼັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ຯລຯ ຄຳວ່າ ຫຼັງຈາກຕາຍໄປ ຕະຖາຄົດເກີດອີກແລະບໍ່ເກີດອີກ ຯລຯ ຄຳວ່າ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍບໍ່ແມ່ນ ບໍ່ເກີດອີກກໍບໍ່ແມ່ນ ນີ້ເຮົາບໍ່ພະຍາກອນ" ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ທິດຖິຈຶ່ງເປັນອັບພະຍາກະຕະ

ສກ. ທິດຖິເປັນອັບພະຍາກະຕະແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ກາຍຍະກຳທີ່ຖືປະຕິບັດໃຫ້ບໍລິບູນຕາມສົມຄວນແກ່ທິດຖິ ວະຈີກຳທີ່ຖືປະຕິບັດໃຫ້ບໍລິບູນຕາມສົມຄວນແກ່ ທິດຖິ ຯລຯ ມະໂນກຳທີ່ຖືປະຕິບັດໃຫ້ບໍລິບູນຕາມສົມຄວນແກ່ທິດຖິ ເຈຕະນາ ຄວາມປາຖະໜາ ຄວາມຕັ້ງໃຈແລະສັງຂານທັງຫຼາຍຂອງບຸກຄົນຜູ້ເປັນມິດສາທິດຖິ ທຳທັງໝົດນັ້ນຍ່ອມເປັນໄປເພື່ອຜົນທີ່ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈ ບໍ່ເກື້ອກູນ ເປັນທຸກ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ທິດຖິເປັນອັບພະຍາກະຕະ"

**ອັບພະຍາກະຕະກະຖາ ຈົບ**

# ໙. ອະປະຣິຍາປັນນະກະຖາ (໑໔໘)

## ວ່າດ້ວຍທຳທີ່ບໍ່ນັບເນື່ອງ (ໃນໂລກິຍະ)

[໗໐໙] ສກ. ທິດຖິເປັນທຳທີ່ບໍ່ນັບເນື່ອງແມ່ນບໍ?

ປຣ. ແມ່ນ

ສກ. ທິດຖິເປັນມັກ ຜົນ ນິບພານ ໂສດາປັດຕິມັກ ໂສດາປັດຕິຜົນ ສະກະທາຄາມິມັກ ສະກະທາຄາມິຜົນ ອະນາຄາມິມັກ ອະນາຄາມິຜົນ ອະຣະຫັດຕະມັກ ອະຣະຫັດຕະຜົນ ສະຕິປັດຖານ ສຳມັບປະທານ ອິດທິບາດ ອິນຊີ ພະລະ ໂພດຊົງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໑໐] ປຣ. ທ່ານບໍ່ຍອມຮັບວ່າ "ທິດຖິເປັນທຳທີ່ບໍ່ນັບເນື່ອງ" ແມ່ນບໍ?

ສກ. ແມ່ນ

ປຣ. ປຸຖຸຊົນ ທ່ານຍອມຮັບວ່າ "ປາສະຈາກຄວາມກຳໜັດໃນກາມທັງຫຼາຍ" ແມ່ນບໍ?

ສກ. ແມ່ນ

ປຣ. ທ່ານຍອມຮັບວ່າ "ປາສະຈາກທິດຖິ" ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ດັ່ງນັ້ນ ທິດຖິຈຶ່ງເປັນທຳທີ່ບໍ່ນັບເນື່ອງ

**ອະປະຣິຍາປັນນະກະຖາ ຈົບ**

**ຈຸດທະສະມະວັກ ຈົບ**

## ລວມກະຖາທີ່ມີໃນວັກນີ້ ຄື

໑. ກຸສະລາກຸສະລະປະຕິສັນທະຫະນະກະຖາ
໒. ສະລາຍະຕະນຸບປັດຕິກະຖາ
໓. ອະນັນຕະຣະປັດຈະຍະກະຖາ
໔. ອະຣິຍະຣູປະກະຖາ
໕. ອັນໂຍອະນຸສະໂຍຕິກະຖາ
໖. ປະຣິຍຸດຖານັງຈິດຕະວິບປະຍຸດຕັນຕິກະຖາ
໗. ປະຣິຍາປັນນະກະຖາ
໘. ອັບພະຍາກະຕະກະຖາ
໙. ອະປະຣິຍາປັນນະກະຖາ

# ໑໕. ປັນນະຣະສະມະວັກ

## ໑. ປັດຈະຍະຕາກະຖາ (໑໔໕)

### ວ່າດ້ວຍຄວາມເປັນປັດໃຈ

[໗໑໑] ສກ. ຄວາມເປັນປັດໃຈມີຈຳກັດໄວ້ແມ່ນບໍ?

ປຣ. ແມ່ນ

ສກ. ວິມັງສາເປັນເຫດແລະເປັນອະທິບໍດີບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກວິມັງສາເປັນເຫດແລະເປັນອະທິບໍດີ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ວິມັງສາເປັນປັດໃຈໂດຍເຫດປັດໃຈ ເປັນປັດໃຈໂດຍອະທິປະຕິປັດໃຈ"

ສກ. ສັນທາທິບໍດີເປັນອະທິບໍດີແຫ່ງສະຫະຊາຕະທຳບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກສັນທາທິບໍດີເປັນອະທິບໍດີແຫ່ງສະຫະຊາຕະທຳ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ສັນທາທິບໍດີເປັນປັດໃຈໂດຍອະທິປະຕິປັດໃຈ ເປັນປັດໃຈໂດຍສະຫະຊາດປັດໃຈ"

[໗໑໒] ສກ. ວິຣິຍາທິບໍດີເປັນອະທິບໍດີແຫ່ງສະຫະຊາຕະທຳບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກວິຣິຍາທິບໍດີເປັນອະທິບໍດີແຫ່ງສະຫະຊາຕະທຳ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ວິຣິຍາທິບໍດີເປັນປັດໃຈໂດຍອະທິປະຕິປັດໃຈ ເປັນປັດໃຈໂດຍສະຫະຊາດປັດໃຈ"

ສກ. ວິຣິຍາທິບໍດີເປັນອະທິບໍດີແຫ່ງສະຫະຊາຕະທຳແລະເປັນອິນຊີບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກວິຣິຍາທິບໍດີເປັນອະທິບໍດີແຫ່ງສະຫະຊາຕະທຳແລະເປັນອິນຊີ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ວິຣິຍາທິບໍດີເປັນປັດໃຈໂດຍອະທິປະຕິປັດໃຈ ເປັນປັດໃຈໂດຍອິນຊີປັດໃຈ"

ສກ. ວິຣິຍາທິບໍດີເປັນອະທິບໍດີແຫ່ງສະຫະຊາຕະທຳແລະເປັນອົງແຫ່ງມັກບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກວິຣິຍາທິບໍດີເປັນອະທິບໍດີແຫ່ງສະຫະຊາຕະທຳ ແລະເປັນອົງແຫ່ງມັກ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ວິຣິຍາທິບໍດີເປັນປັດໃຈໂດຍອະທິປະຕິປັດໃຈ ເປັນປັດໃຈໂດຍມັກຄະປັດໃຈ"

[໗໑໓] ສກ. ຈິດຕາທິບໍດີເປັນອະທິບໍດີແຫ່ງສະຫະຊາຕະທຳບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຈິດຕາທິບໍດີເປັນອະທິບໍດີແຫ່ງສະຫະຊາຕະທຳ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ຈິດຕາທິບໍດີເປັນປັດໄຈໂດຍອະທິປະຕິປັດໄຈ ເປັນປັດໄຈໂດຍສະຫະຊາດປັດໄຈ"

ສກ. ຈິດຕາທິບໍດີເປັນອະທິບໍດີແຫ່ງສະຫະຊາຕະທຳ ແລະເປັນອາຫານບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຈິດຕາທິບໍດີເປັນອະທິບໍດີແຫ່ງສະຫະຊາຕະທຳແລະເປັນອາຫານ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ຈິດຕາທິບໍດີເປັນປັດໄຈໂດຍອະທິປະຕິປັດໄຈ ເປັນປັດໄຈໂດຍອາຫາຣະປັດໄຈ"

ສກ. ຈິດຕາທິບໍດີເປັນອະທິບໍດີແຫ່ງສະຫະຊາຕະທຳ ແລະເປັນອິນຊີບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຈິດຕາທິບໍດີເປັນອະທິບໍດີແຫ່ງສະຫະຊາຕະທຳແລະເປັນອິນຊີ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ຈິດຕາທິບໍດີເປັນປັດໄຈໂດຍອະທິປະຕິປັດໄຈ ເປັນປັດໄຈໂດຍອິນຊີປັດໄຈ"

[ກ໑໘] ສກ. ວິມັງສາທິບໍດີເປັນອະທິບໍດີແຫ່ງສະຫະຊາຕະທຳບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກວິມັງສາທິບໍດີເປັນອະທິບໍດີແຫ່ງສະຫະຊາຕະທຳ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ວິມັງສາທິບໍດີເປັນປັດໄຈໂດຍອະທິປະຕິປັດໄຈ ເປັນປັດໄຈໂດຍສະຫະຊາດປັດໄຈ"

ສກ. ວິມັງສາທິບໍດີເປັນອະທິບໍດີແຫ່ງສະຫະຊາຕະທຳແລະເປັນອິນຊີບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກວິມັງສາທິບໍດີເປັນອະທິບໍດີແຫ່ງສະຫະຊາຕະທຳແລະເປັນອິນຊີ ດັ່ງນັ້ນທ່ານຈຶ່ງຄວນຍອມຮັບວ່າ "ວິມັງສາທິບໍດີເປັນປັດໄຈໂດຍອະທິປະຕິປັດໄຈ ເປັນປັດໄຈໂດຍອິນຊີປັດໄຈ"

ສກ. ວິມັງສາທິບໍດີເປັນອະທິບໍດີແຫ່ງສະຫະຊາຕະທຳແລະເປັນອົງແຫ່ງມັກບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກວິມັງສາທິບໍດີເປັນອະທິບໍດີແຫ່ງສະຫະຊາຕະທຳແລະເປັນອົງແຫ່ງມັກ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ວິມັງສາທິບໍດີເປັນປັດໄຈໂດຍອະທິປະຕິປັດໄຈ ເປັນປັດໄຈໂດຍມັກຄະປັດໄຈ"

[ກ໑໕] ສກ. ສະພາວະທຳທີ່ເປັນເຄື່ອງພິຈາລະນາ ເຮັດອະຣິຍະທຳໃຫ້ໜັກແໜ້ນແລ້ວເກີດຂຶ້ນ ແລະເຮັດອະຣິຍະທຳນັ້ນໃຫ້ເປັນອາລົມບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກສະພາວະທຳທີ່ເປັນເຄື່ອງພິຈາລະນາ ເຮັດອະຣິຍະທຳໃຫ້ໜັກແໜ້ນແລ້ວເກີດຂຶ້ນ ແລະເຮັດອະຣິຍະທຳນັ້ນໃຫ້ເປັນອາລົມ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ສະພາວະທຳທີ່ເປັນເຄື່ອງພິຈາລະນາເປັນປັດໄຈໂດຍອະທິປະຕິປັດໄຈ ເປັນປັດໄຈໂດຍອາຣຳມະນະປັດໄຈ"

[ກ໑໙] ສກ. ສະພາວະທຳທີ່ເປັນກຸສົນກ່ອນ ໆ ເປັນປັດໄຈໂດຍອະນັນຕະຣະປັດໄຈແກ່ສະພາວະທຳທີ່ເປັນກຸສົນຫຼັງ ໆ ແລະສະພາວະທຳທີ່ເປັນກຸສົນນັ້ນເປັນອາເສວນະບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກສະພາວະທຳທີ່ເປັນກຸສົນກ່ອນ ໆ ເປັນປັດໄຈໂດຍອະນັນຕະຣະປັດໄຈແກ່ສະພາວະທຳທີ່ເປັນກຸສົນຫຼັງ ໆ ແລະສະພາວະທຳທີ່ເປັນກຸສົນນັ້ນເປັນອາເສວນະ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ສະພາວະທຳທີ່ເປັນກຸສົນກ່ອນ ໆ ເປັນປັດໄຈ ໂດຍອະນັນຕະຣະປັດໄຈ ເປັນປັດໄຈໂດຍອາເສວະນະປັດໄຈ"

ສກ. ສະພາວະທຳທີ່ເປັນອະກຸສົນກ່ອນ ໆ ເປັນປັດໄຈໂດຍອະນັນຕະຣະປັດໄຈແກ່ສະພາວະທຳທີ່ເປັນອະກຸສົນຫຼັງ ໆ ແລະສະພາວະທຳທີ່ເປັນອະກຸສົນນັ້ນເປັນອາເສວນະບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກສະພາວະທຳທີ່ເປັນອະກຸສົນກ່ອນ ໆ ເປັນປັດໄຈໂດຍອະນັນຕະຣະປັດໄຈແກ່ສະພາວະທຳທີ່ເປັນອະກຸສົນຫຼັງ ໆ ແລະສະພາວະທຳທີ່ເປັນອະກຸສົນນັ້ນເປັນອາເສວະນະ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ສະພາວະທຳທີ່ເປັນອະກຸສົນກ່ອນ ໆ ເປັນປັດໄຈໂດຍອະນັນຕະຣະປັດໄຈ ເປັນປັດໄຈໂດຍອາເສວະນະປັດໄຈ"

ສກ. ສະພາວະທຳທີ່ເປັນກິຣິຍາອັບພະຍາກະຕະກ່ອນ ໆ ເປັນປັດໄຈໂດຍອະນັນຕະຣະປັດໄຈ ແກ່ສະພາວະທຳທີ່ເປັນກິຣິຍາອັບພະຍາກະຕະຫຼັງ ໆ ແລະສະພາວະທຳທີ່ເປັນກິຣິຍາອັບພະຍາກະຕະ ນັ້ນເປັນອາເສວະນະບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກສະພາວະທຳທີ່ເປັນກິຣິຍາອັບພະຍາກະຕະກ່ອນ ໆ ເປັນປັດໄຈໂດຍອະນັນຕະຣະປັດໄຈ ແກ່ສະພາວະທຳທີ່ເປັນກິຣິຍາອັບພະຍາກະຕະຫຼັງ ໆ ແລະສະພາວະທຳທີ່ເປັນກິຣິຍາອັບພະຍາກະຕະ ນັ້ນເປັນອາເສວະນະ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ສະພາວະທຳທີ່ເປັນກິຣິຍາອັບພະຍາກະຕະ ເປັນປັດໄຈໂດຍອະນັນຕະຣະປັດໄຈ ເປັນປັດໄຈໂດຍອາເສວະນະປັດໄຈ"

[ກ໑ກ] ປຣ. ທ່ານບໍ່ຍອມຮັບວ່າ "ຄວາມເປັນປັດໄຈມີຈຳກັດໄວ້" ແມ່ນບໍ?

ສກ. ແມ່ນ

ປຣ. ເປັນປັດໄຈໂດຍເຫດປັດໄຈກໍໄດ້ ເປັນປັດໄຈໂດຍອາຣຳມະນະປັດໄຈກໍໄດ້ ເປັນປັດໄຈໂດຍອະນັນຕະຣະປັດໄຈກໍໄດ້ ເປັນປັດໄຈໂດຍສະມະນັນຕະຣະປັດໄຈກໍໄດ້ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ຄວາມເປັນປັດໄຈມີຈຳກັດໄວ້"

**ປັດຈະຍະຕາກະຖາ ຈົບ**

# ໘. ອັນຍະມັນຍະປັດຈະຍະກະຖາ (໑໔໘)

## ວ່າດ້ວຍອັນຍະມັນຍະປັດໄຈ

[໗໑໗] ສກ. ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ ແຕ່ທ່ານບໍ່ຍອມຮັບວ່າ "ຍ້ອນສັງຂານເປັນປັດໄຈ ອະວິດຊາຈຶ່ງມີ" ແມ່ນບໍ?

ປຣ. ແມ່ນ

ສກ. ອະວິດຊາເກີດພ້ອມກັບສັງຂານບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກອະວິດຊາເກີດພ້ອມກັບສັງຂານ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ ຍ້ອນສັງຂານເປັນປັດໄຈ ອະວິດຊາຈຶ່ງມີ"

ສກ. ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງມີ ແຕ່ທ່ານບໍ່ຍອມຮັບວ່າ "ຍ້ອນອຸປາທານເປັນປັດໄຈ ຕັນຫາຈຶ່ງມີ" ແມ່ນບໍ?

ປຣ. ແມ່ນ

ສກ. ຕັນຫາເກີດພ້ອມກັບອຸປາທານບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຕັນຫາເກີດພ້ອມກັບອຸປາທານ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງມີ ຍ້ອນອຸປາທານເປັນປັດໄຈ ຕັນຫາຈຶ່ງມີ"

[໗໑໘] ປຣ. ພຣະສູດທີ່ວ່າ "ພິກຂຸທັງຫຼາຍ ຍ້ອນຊະຣາມໍຣະນະເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ພົບຈຶ່ງມີ" ມີຢູ່ບໍ?

ສກ. ບໍ່ມີ

ປຣ. ດັ່ງນັ້ນ ທ່ານບໍ່ຄວນຍອມຮັບວ່າ "ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ ຍ້ອນສັງຂານເປັນປັດໄຈ ອະວິດຊາຈຶ່ງມີ ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງມີ ຍ້ອນອຸປາທານເປັນປັດໄຈ ຕັນຫາຈຶ່ງມີ"

ສກ. ພຣະສູດທີ່ວ່າ "ພິກຂຸທັງຫຼາຍ ຍ້ອນວິນຍານເປັນປັດໄຈ ນາມຮູບຈຶ່ງມີ ຍ້ອນນາມຮູບເປັນປັດໄຈ ວິນຍານຈຶ່ງມີ" ມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ຈຶ່ງຄວນຍອມຮັບວ່າ "ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ ຍ້ອນສັງຂານເປັນປັດໄຈ ອະວິດຊາຈຶ່ງມີ ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງມີ ຍ້ອນອຸປາທານເປັນປັດໄຈ ຕັນຫາຈຶ່ງມີ"

**ອັນຍະມັນຍະປັດຈະຍະກະຖາ ຈົບ**

# ໓. ອັດທາກະຖາ (໑໕໗)

## ວ່າດ້ວຍການ

[໗໔໐] ສກ. ການເປັນສະພາວະສຳເລັດແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ເປັນຮູບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເປັນເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການທີ່ເປັນອະດີດເປັນສະພາວະສຳເລັດແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ເປັນຮູບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເປັນເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການທີ່ເປັນອະນາຄົດເປັນສະພາວະສຳເລັດແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ເປັນຮູບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເປັນເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການທີ່ເປັນປັດຈຸບັນເປັນສະພາວະສຳເລັດແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ເປັນຮູບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເປັນເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບ ເວທະນາ ສັນຍາ ສັງຂານ ວິນຍານທີ່ເປັນອະດີດ ເປັນການທີ່ເປັນອະດີດແມ່ນບໍ?

ປຣ. ແມ່ນ

ສກ. ການທີ່ເປັນອະດີດມີ ໕ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຣູບ ເວທະນາ ສັນຍາ ສັງຂານ ວິນຍານທີ່ເປັນອະນາຄົດ ເປັນການທີ່ເປັນອະນາຄົດແມ່ນບໍ?

ປຣ. ແມ່ນ

ສກ. ການທີ່ເປັນອະນາຄົດມີ ໕ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຣູບ ເວທະນາ ສັນຍາ ສັງຂານ ວິນຍານທີ່ເປັນປັດຈຸບັນ ເປັນການທີ່ເປັນປັດຈຸບັນແມ່ນບໍ?

ປຣ. ແມ່ນ

ສກ. ການທີ່ເປັນປັດຈຸບັນມີ ໕ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຂັນ ໕ ທີ່ເປັນອະດີດ ເປັນການທີ່ເປັນອະດີດ ຂັນ ໕ ທີ່ເປັນອະນາຄົດ ເປັນການທີ່ເປັນອະນາຄົດ ຂັນ ໕ ທີ່ເປັນປັດຈຸບັນ ເປັນການທີ່ເປັນປັດຈຸບັນແມ່ນບໍ?

ປຣ. ແມ່ນ

ສກ. ການມີ ໑໕ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອາຍະຕະນະ ໑໒ ທີ່ເປັນອະດີດ ເປັນການທີ່ເປັນອະດີດ ອາຍະຕະນະ ໑໒ ທີ່ເປັນອະນາຄົດ ເປັນການທີ່ເປັນອະນາຄົດ ອາຍະຕະນະ ໑໒ ທີ່ເປັນປັດຈຸບັນ ເປັນການທີ່ເປັນປັດຈຸບັນແມ່ນບໍ?

ປຣ. ແມ່ນ

ສກ. ການມີ ໓໖ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ທາດ ໑໘ ທີ່ເປັນອະດີດ ເປັນການທີ່ເປັນອະດີດ ທາດ ໑໘ ທີ່ເປັນອະນາຄົດ ເປັນການທີ່ເປັນອະນາຄົດ ທາດ ໑໘ ທີ່ເປັນປັດຈຸບັນ ເປັນການທີ່ເປັນປັດຈຸບັນແມ່ນບໍ?

ປຣ. ແມ່ນ

ສກ. ການມີ ໕໔ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອິນຊີ ໒໒ ທີ່ເປັນອະດີດ ເປັນການທີ່ເປັນອະດີດ ອິນຊີ ໒໒ ທີ່ເປັນອະນາຄົດ ເປັນການທີ່ເປັນອະນາຄົດ ອິນຊີ ໒໒ ທີ່ເປັນປັດຈຸບັນ ເປັນການທີ່ເປັນປັດຈຸບັນແມ່ນບໍ?

ປຣ. ແມ່ນ

ສກ. ການມີ ໖໖ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໔໑] ປຣ. ທ່ານບໍ່ຍອມຮັບວ່າ "ການເປັນສະພາວະສຳເລັດແລ້ວ" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ກະຖາວັດຖຸ ໓ ປະການນີ້ກະຖາວັດຖຸ ໓ ປະການ ອັນໃດແດ່ ຄື

໑. ຄວນກ່າວຄຳເວົ້າຍ້ອນອະດີດຕະການວ່າ ອະດີດຕະການໄດ້ມີມາແລ້ວແນວນີ້

໔. ຄວນກ່າວຄຳເວົ້າມຸ້ງເຖິງອະນາຄົດຕະການວ່າ ອະນາຄົດຕະການຈັກມີແນວນີ້

໓. ຄວນກ່າວຄຳເວົ້າສືບເນື່ອງກັບປັດຈຸບັນການວ່າ ປັດຈຸບັນການມີຢູ່ແນວນີ້

ພິກຂຸທັງຫຼາຍ ກະຖາວັດຖຸ ໓ ປະການນີ້"

ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ການເວລາຈຶ່ງເປັນສະພາວະສຳເລັດແລ້ວ

**ອັດທາກະຖາ ຈົບ**

## ໔. ຂະນະລະຍະມຸຫຸດຕະກະຖາ (໑໔໘)

## ວ່າດ້ວຍຂະນະ ໄລຍະ ແລະມຸຫຸດຕະ

[໗໔໔] ສກ. ຂະນະໜຶ່ງ ເປັນສະພາວະສຳເລັດແລ້ວ ໄລຍະໜຶ່ງເປັນສະພາວະສຳເລັດແລ້ວ ມຸຫຸດຕະໜຶ່ງກໍເປັນສະພາວະສຳເລັດແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ເປັນຮູບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເປັນເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໔໓] ປຣ. ທ່ານບໍ່ຍອມຮັບວ່າ "ມຸຫຸດຕະໜຶ່ງເປັນສະພາວະສຳເລັດແລ້ວ" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ກະຖາວັດຖຸ ໓ ປະການນີ້ ກະຖາວັດຖຸ ໓ ປະການ ອັນໃດແດ່ ຄື

໑. ຄວນກ່າວຄຳເວົ້າຍ້ອນອະດີດຕະການວ່າ ອະດີດຕະການໄດ້ມີມາແລ້ວແນວນີ້
໒. ຄວນກ່າວຄຳເວົ້າມຸ້ງເຖິງອະນາຄົດຕະການວ່າ ອະນາຄົດຕະການຈັກມີແນວນີ້
໓. ຄວນກ່າວຄຳເວົ້າສືບເນື່ອງກັບປັດຈຸບັນການວ່າ ປັດຈຸບັນການມີຢູ່ແນວນີ້

ພິກຂຸທັງຫຼາຍ ກະຖາວັດຖຸ ໓ ປະການນີ້" ໑
ມີຢູ່ຈິງບໍ່ແມ່ນບໍ?
ສກ. ແມ່ນ
ປຣ. ດັ່ງນັ້ນ ຂະນະໜຶ່ງຈຶ່ງເປັນສະພາວະສຳເລັດແລ້ວ

**ຂະນະລະຍະມຸຫຸດຕະກະຖາ ຈົບ**

## ໕. ອາສະວະກະຖາ (໑໕໙)

## ວ່າດ້ວຍອາສະວະ

[໗໒໔] ສກ. ອາສະວະ ໔ ບໍ່ເປັນອາລົມຂອງອາສະວະແມ່ນບໍ?
ປຣ. ແມ່ນ
ສກ. ເປັນມັກ ຜົນ ນິບພານ ໂສດາປັດຕິມັກ ໂສດາປັດຕິຜົນ ຯລຯ ໂພດຊົງແມ່ນບໍ?
ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໒໕] ປຣ. ທ່ານບໍ່ຍອມຮັບວ່າ "ອາສະວະ ໔ ບໍ່ເປັນອາລົມຂອງອາສະວະ" ແມ່ນບໍ?
ສກ. ແມ່ນ
ປຣ. ອາສະວະເຫຼົ່ານັ້ນເປັນອາລົມຂອງອາສະວະ ດ້ວຍອາສະວະເຫຼົ່າໃດ ອາສະວະເຫຼົ່ານັ້ນ ມີຢູ່ແມ່ນບໍ?
ສກ. ບໍ່ຄວນກ່າວແນວນັ້ນ ຯລຯ
ປຣ. ດັ່ງນັ້ນ ອາສະວະ ໔ ຈຶ່ງບໍ່ເປັນອາລົມຂອງອາສະວະ

**ອາສະວະກະຖາ ຈົບ**

## ໖. ຊະຣາມໍຣະນະກະຖາ (໑໖໐)

## ວ່າດ້ວຍຊະຣາມໍຣະນະ

[໗໒໖] ສກ. ຊະຣາມໍຣະນະແຫ່ງໂລກຸດຕະຣະທຳເປັນໂລກຸດຕະຣະແມ່ນບໍ?
ປຣ. ແມ່ນ
ສກ. ເປັນມັກ ຜົນ ນິບພານ ໂສດາປັດຕິມັກ ໂສດາປັດຕິຜົນ ຯລຯ ໂພດຊົງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຊະຣາມໍຣະນະແຫ່ງໂສດາປັດຕິມັກເປັນໂສດາປັດຕິມັກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຊະຣາມໍຣະນະແຫ່ງໂສດາປັດຕິມັກເປັນໂສດາປັດຕິມັກແມ່ນບໍ?

ປຣ. ແມ່ນ

ສກ. ຊະຣາມໍຣະນະແຫ່ງໂສດາປັດຕິຜົນເປັນໂສດາປັດຕິຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຊະຣາມໍຣະນະແຫ່ງສະກະທາຄາມິມັກ ຯລຯ ສະກະທາຄາມິຜົນ ຯລຯ ອະນາຄາມິມັກ ຯລຯ ອະນາຄາມິຜົນ ຯລຯ ຊະຣາມໍຣະນະແຫ່ງອະຣະຫັດຕະມັກເປັນອະຣະຫັດຕະມັກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຊະຣາມໍຣະນະແຫ່ງອະຣະຫັດຕະມັກເປັນອະຣະຫັດຕະມັກແມ່ນບໍ?

ປຣ. ແມ່ນ

ສກ. ຊະຣາມໍຣະນະແຫ່ງອະຣະຫັດຕະຜົນເປັນອະຣະຫັດຕະຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຊະຣາມໍຣະນະແຫ່ງສະຕິປັດຖານ ຯລຯ ສໍາມັບປະທານ ຯລຯ ອິດທິບາດ ຯລຯ ອິນຊີ ຯລຯ ພະລະ ຯລຯ ຊະຣາມໍຣະນະແຫ່ງໂພດຊົງ ເປັນໂພດຊົງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໔໗] ປຣ. ທ່ານບໍ່ຍອມຮັບວ່າ "ຊະຣາມໍຣະນະແຫ່ງໂລກຸດຕະຣະທໍາ ເປັນໂລກຸດຕະຣະ" ແມ່ນບໍ?

ສກ. ແມ່ນ

ປຣ. ເປັນໂລກິຍະແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ດັ່ງນັ້ນ ຊະຣາມໍຣະນະຈຶ່ງເປັນໂລກຸດຕະຣະ

**ຊະຣາມໍຣະນະກະຖາ ຈົບ**

## ໗. ສັນຍາເວທະຍິຕະກະຖາ (໑໕໑)

## ວ່າດ້ວຍສັນຍາເວທະຍິຕະນິໂຣທະສະມາບັດ

[໗໔໘] ສກ. ສັນຍາເວທະຍິຕະນິໂຣທະສະມາບັດເປັນໂລກຸດຕະຣະແມ່ນບໍ?

ປຣ. ແມ່ນ

ສກ. ເປັນມັກ ຜົນ ນິບພານ ໂສດາປັດຕິມັກ ໂສດາປັດຕິຜົນ ฯລฯ ໂພດຊົງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໗໔໙] ປຣ. ທ່ານບໍ່ຍອມຮັບວ່າ "ສັນຍາເວທະຍິຕະນິໂຣທະສະມາບັດເປັນໂລກຸດຕະຣະ" ແມ່ນບໍ?

ສກ. ແມ່ນ

ປຣ. ເປັນໂລກິຍະແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ฯລฯ

ປຣ. ດັ່ງນັ້ນ ສັນຍາເວທະຍິຕະນິໂຣທະສະມາບັດ ຈຶ່ງເປັນໂລກຸດຕະຣະ

**ສັນຍາເວທະຍິຕະກະຖາ ຈົບ**

## ໗. ທຸຕິຍະສັນຍາເວທະຍິຕະກະຖາ (໑៥໔)

## ວ່າດ້ວຍສັນຍາເວທະຍິຕະນິໂຣທະສະມາບັດ ທີ ໔

[໗໖໐] ສກ. ສັນຍາເວທະຍິຕະນິໂຣທະສະມາບັດເປັນໂລກິຍະແມ່ນບໍ?

ປຣ. ແມ່ນ

ສກ. ເປັນຮູບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ເປັນເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ວິນຍານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ເປັນກາມາວະຈອນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ເປັນຮູບປາວະຈອນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ເປັນອະຮູບປາວະຈອນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໗໖໑] ປຣ. ທ່ານບໍ່ຍອມຮັບວ່າ "ສັນຍາເວທະຍິຕະນິໂຣທະສະມາບັດເປັນໂລກິຍະ" ແມ່ນບໍ?

ສກ. ແມ່ນ

ປຣ. ເປັນໂລກຸດຕະຣະແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ດັ່ງນັ້ນ ສັນຍາເວທະຍິຕະນິໂຣທະສະມາບັດຈຶ່ງເປັນໂລກິຍະ

**ທຸຕິຍະສັນຍາເວທະຍິຕະກະຖາ ຈົບ**

## ໓. ຕະຕິຍະສັນຍາເວທະຍິຕະກະຖາ (໑໕໓)

## ວ່າດ້ວຍສັນຍາເວທະຍິຕະນິໂຣທະສະມາບັດທີ ໓

[໗໓໔] ສກ. ບຸກຄົນຜູ້ເຂົ້າສັນຍາເວທະຍິຕະນິໂຣທະສະມາບັດອາດຈະຕາຍໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ເຂົ້າສັນຍາເວທະຍິຕະນິໂຣທະສະມາບັດຍັງມີຜັດສະ ເວທະນາ ສັນຍາ ເຈຕະນາ ຈິດ ທີ່ເກີດໃນຂະນະໃກ້ຈະຕາຍແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ເຂົ້າສັນຍາເວທະຍິຕະນິໂຣທະສະມາບັດບໍ່ມີຜັດສະ ເວທະນາ ສັນຍາ ເຈຕະນາ ຈິດ ທີ່ເກີດໃນຂະນະໃກ້ຈະຕາຍແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນຜູ້ເຂົ້າສັນຍາເວທະຍິຕະນິໂຣທະສະມາບັດບໍ່ມີຜັດສະ ເວທະນາ ສັນຍາ ເຈຕະນາ ຈິດ ທີ່ເກີດໃນຂະນະໃກ້ຕາຍ ທ່ານກໍບໍ່ຄວນຍອມຮັບວ່າ "ບຸກຄົນຜູ້ເຂົ້າສັນຍາເວທະຍິຕະນິໂຣທະສະມາບັດອາດຈະຕາຍໄດ້"

ສກ. ບຸກຄົນຜູ້ເຂົ້າສັນຍາເວທະຍິຕະນິໂຣທະສະມາບັດອາດຈະຕາຍໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ເຂົ້າສັນຍາເວທະຍິຕະນິໂຣທະສະມາບັດມີຜັດສະ ເວທະນາ ສັນຍາ ເຈຕະນາ ຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ເຂົ້າສັນຍາເວທະຍິຕະນິໂຣທະສະມາບັດບໍ່ມີຜັດສະ ເວທະນາ ສັນຍາ ເຈຕະນາ ຈິດແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ບໍ່ມີຜັດສະ ບໍ່ມີເວທະນາ ຯລຯ ບໍ່ມີຈິດ ຕາຍໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ມີຜັດສະ ຯລຯ ມີຈິດ ຕາຍໄດ້ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນຜູ້ມີຜັດສະ ຯລຯ ມີຈິດ ຕາຍໄດ້ ທ່ານກໍບໍ່ຄວນຍອມຮັບວ່າ "ບຸກຄົນຜູ້ເຂົ້າສັນຍາເວທະຍິຕະນິໂຣທະສະມາບັດອາດຈະຕາຍໄດ້"

ສກ. ບຸກຄົນຜູ້ເຂົ້າສັນຍາເວທະຍິຕະນິໂຣທະສະມາບັດອາດຈະຕາຍໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຢາພິດ ອາວຸດ ໄຟ ເພິ່ງແຊກຊຶມເຂົ້າໄປໃນຮ່າງກາຍຂອງບຸກຄົນຜູ້ເຂົ້າສັນຍາເວທະຍິຕະນິໂຣທະສະມາບັດໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຢາພິດ ອາວຸດ ໄຟ ບໍ່ເພິ່ງເຮັດຫຍັງເຂົ້າໄປໃນຮ່າງກາຍຂອງບຸກຄົນຜູ້ເຂົ້າສັນຍາເວທະຍິຕະນິໂຣທະສະມາບັດໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຢາພິດ ອາວຸດ ໄຟ ບໍ່ເພິ່ງເຮັດຫຍັງເຂົ້າໄປໃນຮ່າງກາຍຂອງບຸກຄົນຜູ້ເຂົ້າສັນຍາເວທະຍິຕະນິໂຣທະສະມາບັດໄດ້ ທ່ານກໍບໍ່ຄວນຍອມຮັບວ່າ "ບຸກຄົນຜູ້ເຂົ້າສັນຍາເວທະຍິຕະນິໂຣທະສະມາບັດອາດຈະຕາຍໄດ້"

ສກ. ບຸກຄົນຜູ້ເຂົ້າສັນຍາເວທະຍິດນິໂຣດອາດຈະຕາຍໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຢາພິດ ອາວຸດ ໄຟ ເພິ່ງແຊກຊຶມເຂົ້າໄປໃນຮ່າງກາຍຂອງບຸກຄົນຜູ້ເຂົ້າສັນຍາເວທະຍິຕະນິໂຣທະສະມາບັດໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບໍ່ໄດ້ເຂົ້ານິໂຣທະສະມາບັດໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໙໑] ປຣ. ບຸກຄົນຜູ້ເຂົ້າສັນຍາເວທະຍິຕະນິໂຣທະສະມາບັດບໍ່ອາດຈະຕາຍແມ່ນບໍ?

ສກ. ແມ່ນ

ປຣ. ບຸກຄົນຜູ້ເຂົ້າສັນຍາເວທະຍິຕະນິໂຣທະສະມາບັດບໍ່ອາດຈະຕາຍແນ່ນອນດ້ວຍນິຍາມໃດ ນິຍາມນັ້ນມີຢູ່ບໍ?

ສກ. ບໍ່ມີ

ປຣ. ຫາກບຸກຄົນຜູ້ເຂົ້າສັນຍາເວທະຍິຕະນິໂຣທະສະມາບັດ ບໍ່ອາດຈະຕາຍແນ່ນອນດ້ວຍນິຍາມໃດ ນິຍາມນັ້ນບໍ່ມີ ທ່ານກໍບໍ່ຄວນຍອມຮັບວ່າ "ບຸກຄົນຜູ້ເຂົ້າສັນຍາເວທະຍິຕະນິໂຣທະສະມາບັດບໍ່ອາດຈະຕາຍ"

[໑໙໔] ສກ. ບຸກຄົນຜູ້ພຽບພ້ອມດ້ວຍຈັກຂຸວິນຍານບໍ່ອາດຈະຕາຍແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ພຽບພ້ອມດ້ວຍຈັກຂຸວິນຍານບໍ່ອາດຈະຕາຍແນ່ນອນ ດ້ວຍນິຍາມໃດນິຍາມນັ້ນ ມີຢູ່ແມ່ນບໍ?

ປຣ. ບໍ່ມີ

ສກ. ຫາກບຸກຄົນຜູ້ພຽບພ້ອມດ້ວຍຈັກຂຸວິນຍານບໍ່ອາດຈະຕາຍແນ່ນອນດ້ວຍນິຍາມໃດນິຍາມນັ້ນບໍ່ມີ ທ່ານກໍບໍ່ຄວນຍອມຮັບວ່າ "ບຸກຄົນຜູ້ພຽບພ້ອມດ້ວຍຈັກຂຸວິນຍານບໍ່ອາດຈະຕາຍ"

**ຕະຕິຍະສັນຍາເວທະຍິຕະກະຖາ ຈົບ**

# ໑໐. ອະສັນຍະສັດຕູປິກາກະຖາ (໑໕໔)

## ວ່າດ້ວຍສະມາບັດທີ່ເປັນເຫດໃຫ້ເຂົ້າເຖິງພົບແຫ່ງອະສັນຍະສັດ

[໗໓໕] ສກ. ສັນຍາເວທະຍິຕະນິໂຣທະສະມາບັດເປັນເຫດໃຫ້ເຂົ້າເຖິງພົບແຫ່ງອະສັນຍະສັດໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ເຂົ້າສັນຍາເວທະຍິຕະນິໂຣທະສະມາບັດຍັງມີກຸສົນມູນ ຄື ອະໂລພະ ອະໂທສະ ອະໂມຫະ ມີສັດທາ ຯລຯ ວິຣິຍະ ຯລຯ ສະຕິ ຯລຯ ສະມາທິ ຯລຯ ປັນຍາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ເຂົ້າສັນຍາເວທະຍິຕະນິໂຣທະສະມາບັດບໍ່ມີກຸສົນມູນ ຄື ອະໂລພະ ອະໂທສະ ຯລຯ ບໍ່ມີປັນຍາແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນຜູ້ເຂົ້າສັນຍາເວທະຍິຕະນິໂຣທະສະມາບັດບໍ່ມີກຸສົນມູນ ຄື ອະໂລພະ ອະໂທສະ ອະໂມຫະ ບໍ່ມີສັດທາ ຯລຯ ວິຣິຍະ ຯລຯ ສະຕິ ຯລຯ ສະມາທິ ຯລຯ ປັນຍາ ທ່ານກໍບໍ່ຄວນຍອມຮັບວ່າ "ສັນຍາເວທະຍິຕະນິໂຣທະສະມາບັດເປັນເຫດໃຫ້ເຂົ້າເຖິງພົບແຫ່ງອະສັນຍະສັດໄດ້"

ສກ. ສັນຍາເວທະຍິຕະນິໂຣທະສະມາບັດເປັນເຫດໃຫ້ເຂົ້າເຖິງພົບແຫ່ງອະສັນຍະສັດໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ເຂົ້າສັນຍາເວທະຍິຕະນິໂຣທະສະມາບັດຍັງມີຜັດສະ ເວທະນາ ສັນຍາ ເຈຕະນາ ຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ເຂົ້າສັນຍາເວທະຍິຕະນິໂຣທະສະມາບັດບໍ່ມີຜັດສະ ເວທະນາ ສັນຍາ ເຈຕະນາ ຈິດແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ບໍ່ມີຜັດສະມີການຈະເລີນມັກ ຯລຯ ຜູ້ບໍ່ມີຈິດມີການຈະເລີນມັກໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ມີຜັດສະມີການຈະເລີນມັກ ຯລຯ ຜູ້ມີຈິດມີການຈະເລີນມັກໄດ້ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນຜູ້ມີຜັດສະມີການຈະເລີນມັກ ຯລຯ ຜູ້ມີຈິດມີການຈະເລີນມັກໄດ້ ທ່ານກໍບໍ່ຄວນຍອມຮັບວ່າ "ສັນຍາເວທະຍິຕະນິໂຣທະສະມາບັດເປັນເຫດໃຫ້ເຂົ້າເຖິງພົບແຫ່ງອະສັນຍະສັດໄດ້"

ສກ. ສັນຍາເວທະຍິຕະນິໂຣທະສະມາບັດເປັນເຫດໃຫ້ເຂົ້າເຖິງພົບ ແຫ່ງອະສັນຍະສັດໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ເຫຼົ່າຊົນຜູ້ເຂົ້າສັນຍາເວທະຍິຕະນິໂຣທະສະມາບັດທັງໝົດນັ້ນ ເປັນຜູ້ເຂົ້າເຖິງພົບແຫ່ງອະສັນຍະສັດໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໓໖] ປຣ. ທ່ານບໍ່ຍອມຮັບວ່າ "ສັນຍາເວທະຍິຕະນິໂຣທະສະມາບັດເປັນເຫດໃຫ້ເຂົ້າເຖິງພົບແຫ່ງອະສັນຍະສັດໄດ້" ແມ່ນບໍ?

ສກ. ແມ່ນ

ປຣ. ບຸກຄົນບໍ່ມີສັນຍາແມ່ນໃນໂລກນີ້ ກໍເປັນຜູ້ບໍ່ມີສັນຍາແມ່ນໃນພົບແຫ່ງອະສັນຍະສັດນັ້ນບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກບຸກຄົນບໍ່ມີສັນຍາແມ່ນໃນໂລກນີ້ ກໍເປັນຜູ້ບໍ່ມີສັນຍາແມ່ນໃນພົບແຫ່ງອະສັນຍະສັດນັ້ນ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ສັນຍາເວທະຍິຕະນິໂຣທະສະມາບັດເປັນເຫດໃຫ້ເຂົ້າເຖິງພົບແຫ່ງອະສັນຍະສັດໄດ້"

**ອະສັນຍະສັດຕູປິກາກະຖາ ຈົບ**

## ໑໑. ກຳມູປະຈະຍະກະຖາ (໑໕໕)

## ວ່າດ້ວຍກຳທີ່ສັ່ງສົມ

[໗໓໗] ສກ. ກຳກັບກຳທີ່ສັ່ງສົມເປັນຄົນລະຢ່າງກັນແມ່ນບໍ?

ປຣ. ແມ່ນ

ສກ. ຜັດສະກັບຜັດສະທີ່ສັ່ງສົມເປັນຄົນລະຢ່າງກັນ ເວທະນາກັບເວທະນາທີ່ສັ່ງສົມເປັນຄົນລະຢ່າງກັນ ສັນຍາກັບສັນຍາທີ່ສັ່ງສົມເປັນຄົນລະຢ່າງກັນ ເຈຕະນາກັບເຈຕະນາທີ່ສັ່ງສົມເປັນຄົນລະຢ່າງກັນ ຈິດກັບຈິດທີ່ສັ່ງສົມເປັນຄົນລະຢ່າງກັນ ສັດທາກັບສັດທາທີ່ສັ່ງສົມເປັນຄົນລະຢ່າງກັນ ວິຣິຍະກັບວິຣິຍະທີ່ສັ່ງສົມເປັນຄົນລະຢ່າງກັນ ສະຕິກັບສະຕິທີ່ສັ່ງສົມເປັນຄົນລະຢ່າງກັນ ສະມາທິກັບສະມາທິທີ່ສັ່ງສົມເປັນຄົນລະຢ່າງກັນ ປັນຍາກັບປັນຍາທີ່ສັ່ງສົມ ເປັນຄົນລະຢ່າງກັນ ຣາຄະກັບຣາຄະທີ່ສັ່ງສົມເປັນຄົນລະຢ່າງກັນ ຯລຯ ອະໂນດຕັປປະກັບອະໂນດຕັປປະທີ່ສັ່ງສົມເປັນຄົນລະຢ່າງກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໑໘] ສກ. ກຳກັບກຳທີ່ສັ່ງສົມເປັນຄົນລະຢ່າງກັນແມ່ນບໍ?

ປຣ. ແມ່ນ

ສກ. ກຳທີ່ສັ່ງສົມເກີດພ້ອມກັບກຳແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກຳທີ່ສັ່ງສົມເກີດພ້ອມກັບກຳແມ່ນບໍ?

ປຣ. ແມ່ນ

ສກ. ກຳທີ່ສັ່ງສົມທີ່ເກີດພ້ອມກັບກຸສົນກຳເປັນກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກຳທີ່ສັ່ງສົມທີ່ເກີດພ້ອມກັບກຸສົນກຳເປັນກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ກຳທີ່ສັ່ງສົມທີ່ເກີດພ້ອມກັບກຳເຊິ່ງສຳປະຍຸດດ້ວຍສຸກຂະເວທະນາກໍສຳປະຍຸດດ້ວຍສຸກຂະເວທະນາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກຳທີ່ສັ່ງສົມທີ່ເກີດພ້ອມກັບກຳເຊິ່ງສຳປະຍຸດດ້ວຍທຸກຂະເວທະນາ ຯລຯ ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ກໍສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໑໙] ສກ. ກຳທີ່ສັ່ງສົມເກີດພ້ອມກັບກຳແມ່ນບໍ?

ປຣ. ແມ່ນ

ສກ. ກຳທີ່ສັ່ງສົມທີ່ເກີດພ້ອມກັບອະກຸສົນກຳເປັນອະກຸສົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກຳທີ່ສັ່ງສົມທີ່ເກີດພ້ອມກັບອະກຸສົນກຳເປັນອະກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ກຳທີ່ສັ່ງສົມທີ່ເກີດພ້ອມກັບກຳ ເຊິ່ງສຳປະຍຸດດ້ວຍສຸກຂະເວທະນາກໍສຳປະຍຸດດ້ວຍສຸກຂະເວທະນາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກຳທີ່ສັ່ງສົມທີ່ເກີດພ້ອມກັບກຳເຊິ່ງສຳປະຍຸດດ້ວຍທຸກຂະເວທະນາ ຯລຯ ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ກໍສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໔໐] ສກ. ກຳເກີດພ້ອມກັບຈິດ ກຳຮັບຮູ້ອາລົມໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ກຳທີ່ສັ່ງສົມເກີດພ້ອມກັບຈິດ ກຳທີ່ສັ່ງສົມຮັບຮູ້ອາລົມໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກຳທີ່ສັ່ງສົມເກີດພ້ອມກັບຈິດ ກຳທີ່ສັ່ງສົມຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ກຳເກີດພ້ອມກັບຈິດ ກຳຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກຳເກີດພ້ອມກັບຈິດ ເມື່ອຈິດແຕກດັບ ກຳກໍແຕກສະຫຼາຍໄປແມ່ນບໍ?

ປຣ. ແມ່ນ

ສກ. ກຳທີ່ສັ່ງສົມເກີດພ້ອມກັບຈິດ ເມື່ອຈິດແຕກດັບ ກຳທີ່ສັ່ງສົມກໍແຕກສະຫຼາຍໄປແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກຳທີ່ສັ່ງສົມເກີດພ້ອມກັບຈິດ ເມື່ອຈິດແຕກດັບ ກຳທີ່ສັ່ງສົມບໍ່ແຕກສະຫຼາຍໄປແມ່ນບໍ?

ປຣ. ແມ່ນ

ສກ. ກຳເກີດພ້ອມກັບຈິດ ເມື່ອຈິດແຕກດັບ ກຳບໍ່ແຕກສະຫຼາຍໄປແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໔໑] ສກ. ເມື່ອກຳມີຢູ່ ກຳທີ່ສັ່ງສົມກໍມີແມ່ນບໍ?

ປຣ. ແມ່ນ

ສກ. ກຳກັບກຳທີ່ສັ່ງສົມເປັນແນວດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອກຳມີຢູ່ ກຳທີ່ສັ່ງສົມເປັນແດນເກີດແຫ່ງວິບາກແມ່ນບໍ?

ປຣ. ແມ່ນ

ສກ. ກຳກັບກຳທີ່ສັ່ງສົມເປັນແນວດຽວກັນ ວິບາກກຳກໍເປັນແນວດຽວກັນ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອກຳມີຢູ່ ກຳທີ່ສັ່ງສົມເປັນແດນເກີດແຫ່ງວິບາກ ວິບາກຮັບຮູ້ອາລົມໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ກຳທີ່ສັ່ງສົມຮັບຮູ້ອາລົມໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກຳທີ່ສັ່ງສົມຮັບຮູ້ອາລົມບໍ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ວິບາກບໍ່ມີອາລົມແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໔໘] ສກ. ກຳກັບກຳທີ່ສັ່ງສົມເປັນຄົນລະຢ່າງກັນແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ປຸນນະ ບຸກຄົນບາງຄົນໃນໂລກນີ້ ປຸງແຕ່ງກາຍສັງຂານທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ ປຸງແຕ່ງວະຈີສັງຂານ ຯລຯ ມະໂນສັງຂານ ທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ ເຂົາເມື່ອປຸງແຕ່ງກາຍສັງຂານທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ ປຸງແຕ່ງວະຈີສັງຂານ ຯລຯ ມະໂນສັງຂານທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ແລ້ວ ຍ່ອມເຂົ້າເຖິງໂລກທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ ຜັດສະທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ ຍ່ອມຖືກຕ້ອງບຸກຄົນຜູ້ເຂົ້າເຖິງໂລກທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ ເຂົາຖືກຜັດສະທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ກະທົບເຂົ້າ ຍ່ອມສະເຫວີຍເວທະນາທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ ມີສຸກແລະທຸກຂະສົມກັນ ເໝືອນມະນຸດ ເທວະດາບາງພວກ ແລະວິນິປາຕິກະບາງພວກ ປຸນນະ ຍ້ອນກຳທີ່ມີດັ່ງນີ້ແລ ຄວາມເກີດຂຶ້ນຂອງສັດຈຶ່ງມີໄດ້ ສັດຍ່ອມເກີດຂຶ້ນຍ້ອນກຳທີ່ເຮັດໄວ້ ຜັດສະຍ່ອມຖືກຕ້ອງສັດຜູ້ເກີດແລ້ວນັ້ນ ເຮົາກ່າວແນວນີ້ວ່າ ສັດທັງຫຼາຍເປັນຜູ້ຮັບຜົນແຫ່ງກຳ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ກຳກັບກຳທີ່ສັ່ງສົມເປັນຄົນລະຢ່າງກັນ"

**ກຳມູປະຈະຍະກະຖາ ຈົບ**

**ປັນນະຣະສະມະວັກ ຈົບ**

## ລວມກະຖາທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ປັດຈະຍະຕາກະຖາ | ໒. ອັນຍະມັນຍະປັດຈະຍະກະຖາ |
| ໓. ອັດທາກະຖາ | ໔. ຊະນະລະຍະມຸທຸດຕະກະຖາ |
| ໕. ອາສະວະກະຖາ | ໖. ຊະຣາມໍຣະນະກະຖາ |
| ໗. ສັນຍາເວທະຍິຕະກະຖາ | ໘. ທຸຕິຍະສັນຍາເວທະຍິຕະກະຖາ |
| ໙. ຕະຕິຍະສັນຍາເວທະຍິຕະກະຖາ | ໑໐. ອະສັນຍະສັດຕູປິກາກະຖາ |
| ໑໑. ກຳມູປະຈະຍະກະຖາ | |

**ຕະຕິຍະປັນນາດ ຈົບ**

## ລວມວັກທີ່ມີໃນຕະຕິຍະປັນນາດນີ້ ຄື

ວັກທີ ໑໑ ເລີ່ມດ້ວຍຕິດໂສປິອະນຸສະຍະກະຖາ

ວັກທີ ໑໒ ເລີ່ມດ້ວຍສັງວະໂຣກຳມັນຕິກະຖາ

ວັກທີ ໑໓ ເລີ່ມດ້ວຍກັບປັດຖະກະຖາ

ວັກທີ ໑໔ ເລີ່ມດ້ວຍກຸສະລາກຸສະລະປະຕິສັນທະທະນະກະຖາ

ວັກທີ ໑໕ ເລີ່ມດ້ວຍປັດຈະຍະຕາກະຖາ

# ໑໖. ໂສລະສະມະວັກ

## ໑. ນິກຄະຫະກະຖາ (໑໕໖)

### ວ່າດ້ວຍການຂົ່ມຈິດ

[໗໕໓] ສກ. ບຸກຄົນອື່ນຂົ່ມຈິດຂອງຄົນອື່ນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນອື່ນຂົ່ມຈິດຂອງຄົນອື່ນວ່າ "ຢ່າກຳໜັດ ຢ່າຂັດເຄືອງ ຢ່າຫຼົງ ຢ່າເສົ້າໝອງໄດ້" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນອື່ນຂົ່ມຈິດຂອງຄົນອື່ນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນອື່ນຂົ່ມໄດ້ວ່າ "ຜັດສະທີ່ເກີດຂື້ນແກ່ຄົນອື່ນຢ່າໄດ້ດັບໄປເລີຍ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນອື່ນຂົ່ມໄດ້ວ່າ "ເວທະນາທີ່ເກີດຂື້ນ ຯລຯ ສັນຍາທີ່ເກີດຂື້ນ ຯລຯ ເຈຕະນາທີ່ເກີດຂື້ນ ຯລຯ ຈິດທີ່ເກີດຂື້ນ ຯລຯ ສັດທາທີ່ເກີດຂື້ນ ຯລຯ ວິຣິຍະທີ່ເກີດຂື້ນ ຯລຯ ສະຕິທີ່ເກີດຂື້ນ ຯລຯ ສະມາທິທີ່ເກີດຂື້ນ ຯລຯ ປັນຍາທີ່ເກີດຂື້ນແກ່ຄົນອື່ນຢ່າໄດ້ດັບໄປເລີຍ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນອື່ນຂົ່ມຈິດຂອງຄົນອື່ນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນອື່ນລະຣາຄະ ໂທສະ ຯລຯ ອະໂນດຕັບປະ ເພື່ອປະໂຫຍດແກ່ຄົນອື່ນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນອື່ນຂົ່ມຈິດຂອງຄົນອື່ນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນອື່ນຈະເລີນມັກ ສະຕິປັດຖານ ຯລຯ ໂພດຊົງ ເພື່ອປະໂຫຍດແກ່ຄົນອື່ນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນອື່ນຂົ່ມຈິດຂອງຄົນອື່ນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນອື່ນກຳນົດຮູ້ທຸກ ລະສະມຸໄທ ເຮັດໃຫ້ແຈ້ງນິໂຣດ ຈະເລີນມັກ ເພື່ອປະໂຫຍດແກ່ຄົນອື່ນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນອື່ນຂົ່ມຈິດຂອງຄົນອື່ນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນອື່ນເຮັດໃຫ້ແກ່ຄົນອື່ນ ສຸກທຸກມີຜູ້ອື່ນເປັນຕົວການ ບຸກຄົນຄົນລະຄົນກັນທັງເຮັດແລະສະເຫວີຍແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນອື່ນຂົ່ມຈິດຂອງຄົນອື່ນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ບຸກຄົນເຮັດບາບເອງກໍເສົ້າໝອງເອງ
ບໍ່ເຮັດບາບເອງກໍບໍລິສຸດເອງ
ຄວາມບໍລິສຸດ ແລະບໍ່ບໍລິສຸດເປັນຂອງສະເພາະຕົນ
ບຸກຄົນອື່ນຈະເຮັດຄົນອື່ນໃຫ້ບໍລິສຸດບໍ່ໄດ້"

ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ບຸກຄົນອື່ນຂົ່ມຈິດຂອງຄົນອື່ນໄດ້"

[໗໕໔] ປຣ. ທ່ານບໍ່ຍອມຮັບວ່າ "ບຸກຄົນອື່ນຂົ່ມຈິດຂອງຄົນອື່ນໄດ້" ແມ່ນບໍ?

ສກ. ແມ່ນ

ປຣ. ບຸກຄົນຜູ້ມີກຳລັງມີຢູ່ ບຸກຄົນຜູ້ມີອຳນາດກໍມີຢູ່ບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກບຸກຄົນຜູ້ມີກຳລັງມີຢູ່ ບຸກຄົນຜູ້ມີອຳນາດກໍມີຢູ່ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ບຸກຄົນອື່ນຂົ່ມຈິດຂອງຄົນອື່ນໄດ້"

**ນິກຄະຫະກະຖາ ຈົບ**

# ໘. ປັກຄະຫະກະຖາ (໑໕໗)

## ວ່າດ້ວຍການບັງຄັບຈິດ

[໗໕໕] ສກ. ບຸກຄົນອື່ນບັງຄັບຈິດຂອງຄົນອື່ນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນອື່ນບັງຄັບຈິດຂອງຄົນອື່ນວ່າ "ຢ່າກຳໜັດ ຢ່າຂັດເຄືອງ ຢ່າຫຼົງ ຢ່າເສົ້າໝອງໄດ້" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນອື່ນບັງຄັບຈິດຂອງຄົນອື່ນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນອື່ນໃຫ້ກຸສົນມູນ ຄື ອະໂລພະ ອະໂທສະ ອະໂມຫະ ສັດທາ ວິຣິຍະ ສະຕິ ສະມາທິ ປັນຍາເກີດແກ່ຄົນອື່ນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນອື່ນບັງຄັບຈິດຂອງຄົນອື່ນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນອື່ນບັງຄັບວ່າ "ຜັດສະທີ່ເກີດຂື້ນແກ່ຄົນອື່ນຢ່າໄດ້ດັບໄປເລີຍ" ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນອື່ນບັງຄັບວ່າ "ເວທະນາທີ່ເກີດຂື້ນ ຯລຯ ປັນຍາທີ່ເກີດຂື້ນແກ່ຄົນອື່ນ ຢ່າໄດ້ດັບໄປເລີຍ" ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນອື່ນບັງຄັບຈິດຂອງຄົນອື່ນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນອື່ນລະຣາຄະ ໂທສະ ໂມຫະ ຯລຯ ອະໂນດຕັບປະ ເພື່ອປະໂຫຍດແກ່ຄົນອື່ນ ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນອື່ນບັງຄັບຈິດຂອງຄົນອື່ນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນອື່ນຈະເລີນມັກ ສະຕິປັດຖານ ຯລຯ ໂພດຊົງ ເພື່ອປະໂຫຍດແກ່ຄົນອື່ນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນອື່ນບັງຄັບຈິດຂອງຄົນອື່ນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນອື່ນກຳນົດຮູ້ທຸກ ຯລຯ ຈະເລີນມັກ ເພື່ອປະໂຫຍດແກ່ຄົນອື່ນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນອື່ນບັງຄັບຈິດຂອງຄົນອື່ນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນອື່ນເຮັດໃຫ້ແກ່ຄົນອື່ນ ສຸກທຸກມີຜູ້ອື່ນເປັນຕົວການ ບຸກຄົນຄົນລະຄົນກັນທັງເຮັດແລະສະເຫວີຍແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນອື່ນບັງຄັບຈິດຂອງຄົນອື່ນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ບຸກຄົນເຮັດບາບເອງ ຯລຯ ບຸກຄົນອື່ນຈະເຮັດຄົນອື່ນໃຫ້ບໍລິສຸດບໍ່ໄດ້" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ບຸກຄົນອື່ນບັງຄັບຈິດຂອງຄົນອື່ນໄດ້"

[໗໕໖] ປຣ. ທ່ານບໍ່ຍອມຮັບວ່າ "ບຸກຄົນອື່ນບັງຄັບຈິດຂອງຄົນອື່ນໄດ້" ແມ່ນບໍ?

ສກ. ແມ່ນ

ປຣ. ບຸກຄົນຜູ້ມີກຳລັງມີຢູ່ ຄົນຜູ້ມີອຳນາດກໍມີຢູ່ບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກບຸກຄົນຜູ້ມີກຳລັງມີຢູ່ ບຸກຄົນຜູ້ມີອຳນາດກໍມີຢູ່ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ບຸກຄົນອື່ນບັງຄັບຈິດຂອງຄົນອື່ນໄດ້"

**ປັກຄະຫະກະຖາ ຈົບ**

## ๓. ສຸຂານຸບປະທານກະຖາ (໑໕໗)

## ວ່າດ້ວຍການມອບສຸກ

[໗໕໗] ສກ. ບຸກຄົນອື່ນມອບສຸກໃຫ້ຄົນອື່ນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນອື່ນມອບທຸກໃຫ້ຄົນອື່ນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນອື່ນມອບທຸກໃຫ້ຄົນອື່ນບໍ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນອື່ນມອບສຸກໃຫ້ຄົນອື່ນບໍ່ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນອື່ນມອບສຸກໃຫ້ຄົນອື່ນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນອື່ນມອບສຸກຂອງຕົນ ສຸກຂອງຄົນເຫຼົ່າອື່ນ ສຸກຂອງຜູ້ຮັບນັ້ນໃຫ້ຄົນອື່ນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນອື່ນມອບສຸກຂອງຕົນ ສຸກຂອງຄົນເຫຼົ່າອື່ນ ສຸກຂອງຜູ້ຮັບນັ້ນໃຫ້ຄົນອື່ນບໍ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນອື່ນມອບສຸກຂອງຕົນ ສຸກຂອງຄົນເຫຼົ່າອື່ນ ສຸກຂອງຜູ້ຮັບນັ້ນໃຫ້ຄົນອື່ນບໍ່ໄດ້ ທ່ານກໍບໍ່ຄວນຍອມຮັບວ່າ "ບຸກຄົນອື່ນມອບສຸກໃຫ້ຄົນອື່ນໄດ້"

ສກ. ບຸກຄົນອື່ນມອບສຸກໃຫ້ຄົນອື່ນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນອື່ນເຮັດໃຫ້ແກ່ຄົນອື່ນ ສຸກທຸກມີຜູ້ອື່ນເປັນຕົວການ ບຸກຄົນຄົນລະຄົນກັນທັງເຮັດແລະສະເຫວີຍແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[ໆ៥໗] ປຣ. ທ່ານບໍ່ຍອມຮັບວ່າ "ບຸກຄົນອື່ນມອບສຸກໃຫ້ຄົນອື່ນໄດ້" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ວ່າ "ທ່ານພຣະອຸທາຍີໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ ພຣະຜູ້ມີພຣະພາກເຈົ້າຊົງກໍາຈັດ ສະພາວະທໍາອັນເປັນເຫດແຫ່ງທຸກເປັນຈໍານວນຫຼາຍຂອງເຮົາທັງຫຼາຍອອກໄປໄດ້ ພຣະຜູ້ມີພຣະພາກເຈົ້າຊົງນໍາສະພາວະທໍາອັນເປັນເຫດແຫ່ງສຸກເປັນຈໍານວນຫຼາຍມາໃຫ້ເຮົາທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຊົງກໍາຈັດສະພາວະທໍາທີ່ເປັນອະກຸສົນເປັນຈໍານວນຫຼາຍຂອງເຮົາທັງຫຼາຍອອກໄປໄດ້ ພຣະຜູ້ມີພຣະພາກເຈົ້າຊົງນໍາສະພາວະທໍາທີ່ເປັນກຸສົນເປັນຈໍານວນຫຼາຍມາໃຫ້ເຮົາທັງຫຼາຍ" ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ບຸກຄົນອື່ນຈຶ່ງມອບສຸກໃຫ້ຄົນອື່ນໄດ້

**ສຸຂານຸບປະທານະກະຖາ ຈົບ**

# ໔. ອະທິໄຄທະມະນະສິກາຣະກະຖາ (໑໕໙)

## ວ່າດ້ວຍມະນະສິການລວມຍອດ

[໗໔໙] ສກ. ບຸກຄົນມະນະສິການລວມຍອດໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຮູ້ຊັດແຈ້ງຈິດນັ້ນດ້ວຍຈິດນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູ້ຊັດແຈ້ງຈິດນັ້ນດ້ວຍຈິດນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ຮູ້ຊັດແຈ້ງຈິດນັ້ນດ້ວຍຈິດນັ້ນວ່າ "ເປັນຈິດ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູ້ຊັດແຈ້ງຈິດນັ້ນດ້ວຍຈິດນັ້ນວ່າ "ເປັນຈິດ" ແມ່ນບໍ?

ປຣ. ແມ່ນ

ສກ. ຈິດນັ້ນເປັນອາລົມຂອງຈິດນັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈິດນັ້ນເປັນອາລົມຂອງຈິດນັ້ນແມ່ນບໍ?

ປຣ. ແມ່ນ

ສກ. ຖືກຕ້ອງຜັດສະນັ້ນດ້ວຍຜັດສະນັ້ນ ສະເຫວີຍເວທະນານັ້ນດ້ວຍເວທະນານັ້ນ ຯລຯ ຈຳສັນຍານັ້ນດ້ວຍສັນຍານັ້ນ ຯລຯ ຈົງໃຈເຈຕະນານັ້ນດ້ວຍເຈຕະນານັ້ນ ຯລຯ ຄິດຈິດນັ້ນດ້ວຍຈິດນັ້ນ ຯລຯ ນຶກເຖິງວິຕົກນັ້ນດ້ວຍວິຕົກນັ້ນ ຯລຯ ຕອງວິຈານນັ້ນດ້ວຍວິຈານນັ້ນ ຯລຯ ເອີບອີ່ມປີຕິນັ້ນດ້ວຍປີຕິນັ້ນ ຯລຯ ຣະລຶກສະຕິນັ້ນດ້ວຍສະຕິນັ້ນ ຯລຯ ຮູ້ຊັດແຈ້ງປັນຍານັ້ນດ້ວຍປັນຍານັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໕໐] ສກ. ບຸກຄົນເມື່ອມະນະສິການສະພາວະທຳທີ່ເປັນອະດີດວ່າ "ເປັນອະດີດ" ຍ່ອມມະນະສິການສະພາວະທຳທີ່ເປັນອະນາຄົດວ່າ "ເປັນອະນາຄົດ" ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອມະນະສິການສະພາວະທຳທີ່ເປັນອະດີດວ່າ "ເປັນອະດີດ" ຍ່ອມມະນະສິການສະພາວະທຳທີ່ເປັນອະນາຄົດວ່າ "ເປັນອະນາຄົດ" ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ມີການປະຊຸມແຫ່ງຜັດສະ ໒ ຢ່າງ ຯລຯ ຈິດ ໒ ດວງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອມະນະສິການສະພາວະທຳທີ່ເປັນອະດີດວ່າ "ເປັນອະດີດ" ຍ່ອມມະນະສິການສະພາວະທຳທີ່ເປັນປັດຈຸບັນວ່າ "ເປັນປັດຈຸບັນ" ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອມະນະສິການສະພາວະທຳທີ່ເປັນອະດີດວ່າ "ເປັນອະດີດ" ຍ່ອມມະນະສິການສະພາວະທຳທີ່ເປັນປັດຈຸບັນວ່າ "ເປັນປັດຈຸບັນ" ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ມີການປະຊຸມແຫ່ງຜັດສະ ໒ ຢ່າງ ຯລຯ ຈິດ ໒ ດວງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອມະນະສິການສະພາວະທຳທີ່ເປັນອະດີດວ່າ "ເປັນອະດີດ" ຍ່ອມມະນະສິການສະພາວະທຳທີ່ເປັນອະນາຄົດວ່າ "ເປັນອະນາຄົດ" ມະນະສິການສະພາວະທຳທີ່ເປັນປັດຈຸບັນວ່າ "ເປັນປັດຈຸບັນ" ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອມະນະສິການສະພາວະທຳທີ່ເປັນອະດີດວ່າ "ເປັນອະດີດ" ຍ່ອມມະນະສິການສະພາວະທຳທີ່ເປັນອະນາຄົດວ່າ "ເປັນອະນາຄົດ" ມະນະສິການສະພາວະທຳທີ່ເປັນປັດຈຸບັນວ່າ "ເປັນປັດຈຸບັນ" ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ມີການປະຊຸມແຫ່ງຜັດສະ ໓ ຢ່າງ ຯລຯ ຈິດ ໓ ດວງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໕໑] ສກ. ເມື່ອມະນະສິການສະພາວະທຳທີ່ເປັນອະນາຄົດວ່າ "ເປັນອະນາຄົດ" ຍ່ອມມະນະສິການສະພາວະທຳທີ່ເປັນອະດີດວ່າ "ເປັນອະດີດ" ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອມະນະສິການສະພາວະທຳທີ່ເປັນອະນາຄົດວ່າ "ເປັນອະນາຄົດ" ຍ່ອມມະນະສິການສະພາວະທຳທີ່ເປັນອະດີດວ່າ "ເປັນອະດີດ" ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ມີການປະຊຸມແຫ່ງຜັດສະ ໒ ຢ່າງ ຯລຯ ຈິດ ໒ ດວງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອມະນະສິການສະພາວະທຳທີ່ເປັນອະນາຄົດວ່າ "ເປັນອະນາຄົດ" ຍ່ອມມະນະສິການສະພາວະທຳທີ່ເປັນປັດຈຸບັນວ່າ "ເປັນປັດຈຸບັນ" ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອມະນະສິການສະພາວະທຳທີ່ເປັນອະນາຄົດວ່າ "ເປັນອະນາຄົດ" ຍ່ອມມະນະສິການສະພາວະທຳທີ່ເປັນປັດຈຸບັນວ່າ "ເປັນປັດຈຸບັນ" ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ມີການປະຊຸມແຫ່ງຜັດສະ ໒ ຢ່າງ ຯລຯ ຈິດ ໒ ດວງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອມະນະສິການສະພາວະທຳທີ່ເປັນອະນາຄົດວ່າ "ເປັນອະນາຄົດ" ຍ່ອມມະນະສິການສະພາວະທຳທີ່ເປັນອະດີດວ່າ "ເປັນອະດີດ" ມະນະສິການສະພາວະທຳທີ່ເປັນປັດຈຸບັນວ່າ "ເປັນປັດຈຸບັນ" ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອມະນະສິການສະພາວະທຳທີ່ເປັນອະນາຄົດວ່າ "ເປັນອະນາຄົດ" ຍ່ອມມະນະສິການສະພາວະທຳທີ່ເປັນອະດີດວ່າ "ເປັນອະດີດ" ມະນະສິການສະພາວະທຳທີ່ເປັນປັດຈຸບັນວ່າ "ເປັນປັດຈຸບັນ" ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ມີການປະຊຸມແຫ່ງຜັດສະ ໓ ຢ່າງ ຯລຯ ຈິດ ໓ ດວງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໕໒] ສກ. ເມື່ອມະນະສິການສະພາວະທຳທີ່ເປັນປັດຈຸບັນວ່າ "ເປັນປັດຈຸບັນ" ຍ່ອມມະນະສິການສະພາວະທຳທີ່ເປັນອະດີດວ່າ "ເປັນອະດີດ" ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອມະນະສິການສະພາວະທຳທີ່ເປັນປັດຈຸບັນວ່າ "ເປັນປັດຈຸບັນ" ຍ່ອມມະນະສິການ ສະພາວະທຳທີ່ເປັນອະດີດວ່າ "ເປັນອະດີດ" ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ມີການປະຊຸມແຫ່ງຜັດສະ ໒ ຢ່າງ ຯລຯ ຈິດ ໒ ດວງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອມະນະສິການສະພາວະທຳທີ່ເປັນປັດຈຸບັນວ່າ "ເປັນປັດຈຸບັນ" ຍ່ອມມະນະສິການສະພາວະທຳທີ່ເປັນອະນາຄົດວ່າ "ເປັນອະນາຄົດ" ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອມະນະສິການສະພາວະທຳທີ່ເປັນປັດຈຸບັນວ່າ "ເປັນປັດຈຸບັນ" ຍ່ອມມະນະສິການ ສະພາວະທຳທີ່ເປັນອະນາຄົດວ່າ "ເປັນອະນາຄົດ" ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ມີການປະຊຸມແຫ່ງຜັດສະ ໒ ຢ່າງ ຯລຯ ຈິດ ໒ ດວງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມື່ອມະນະສິການສະພາວະທຳທີ່ເປັນປັດຈຸບັນວ່າ "ເປັນປັດຈຸບັນ" ຍ່ອມມະນະສິການ ສະພາວະທຳທີ່ເປັນອະດີດວ່າ "ເປັນອະດີດ" ມະນະສິການສະພາວະທຳທີ່ເປັນອະນາຄົດວ່າ "ເປັນອະນາຄົດ" ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ເມື່ອມະນະສິການສະພາວະທຳທີ່ເປັນປັດຈຸບັນວ່າ "ເປັນປັດຈຸບັນ" ຍ່ອມມະນະສິການ ສະພາວະທຳທີ່ເປັນອະດີດວ່າ "ເປັນອະດີດ" ມະນະສິການສະພາວະທຳທີ່ເປັນອະນາຄົດວ່າ "ເປັນອະນາຄົດ" ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ມີການປະຊຸມແຫ່ງຜັດສະ ໓ ຢ່າງ ฯລฯ ຈິດ ໓ ດວງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໗໕໓] ປຣ. ທ່ານບໍ່ຍອມຮັບວ່າ "ບຸກຄົນມະນະສິການລວມຍອດ" ໄດ້ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ເມື່ອໃດ ອະຣິຍະສາວົກພິຈາລະນາເຫັນດ້ວຍປັນຍາວ່າ
ສັງຂານທັງຫຼາຍທັງປວງບໍ່ທ່ຽງ
ເມື່ອນັ້ນ ຍ່ອມໜ່າຍໃນທຸກ
ນັ້ນເປັນທາງແຫ່ງຄວາມບໍລິສຸດ
ເມື່ອໃດ ອະຣິຍະສາວົກພິຈາລະນາເຫັນດ້ວຍປັນຍາວ່າ
ສັງຂານທັງຫຼາຍທັງປວງເປັນທຸກ
ເມື່ອນັ້ນ ຍ່ອມໜ່າຍໃນທຸກ
ນັ້ນເປັນທາງແຫ່ງຄວາມບໍລິສຸດ
ເມື່ອໃດ ອະຣິຍະສາວົກພິຈາລະນາເຫັນດ້ວຍປັນຍາວ່າ
ທຳທັງຫຼາຍທັງປວງເປັນອະນັດຕາ
ເມື່ອນັ້ນ ຍ່ອມໜ່າຍໃນທຸກ
ນັ້ນເປັນທາງແຫ່ງຄວາມບໍລິສຸດ"

ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ບຸກຄົນຈຶ່ງມະນະສິການລວມຍອດໄດ້

**ອະທິໄຄທະມະນະສິກາຣະກະຖາ ຈົບ**

# ໕. ຮູປັງເຫຕູຕິກະຖາ (໑໖໐)

## ວ່າດ້ວຍຮູບເປັນເຫດ

[໗໕໔] ສກ. ຮູບເປັນເຫດແມ່ນບໍ?

ປຣ. ແມ່ນ

ສກ. ອະໂລພະເປັນເຫດແມ່ນບໍ?

ປຣ. ບໍ່ຄວນກ່າວແບວນັ້ນ ຯລຯ

ສກ. ອະໂທສະເປັນເຫດ ຯລຯ ອະໂມຫະ ຯລຯ ໂລພະ ຯລຯ ໂທສະ ຯລຯ ໂມຫະເປັນເຫດແມ່ນບໍ?

ປຣ. ບໍ່ຄວນກ່າວແບວນັ້ນ ຯລຯ

ສກ. ຮູບເປັນເຫດແມ່ນບໍ?

ປຣ. ແມ່ນ

ສກ. ຮູບຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແບວນັ້ນ ຯລຯ

ສກ. ຮູບຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຮູບຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈ ທ່ານກໍບໍ່ຄວນຍອມຮັບວ່າ "ຮູບເປັນເຫດ"

[໗໕໕] ສກ. ອະໂລພະເປັນເຫດ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ຮູບເປັນເຫດ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແບວນັ້ນ ຯລຯ

ສກ. ອະໂທສະເປັນເຫດ ຯລຯ ອະໂມຫະ ຯລຯ ໂລພະ ຯລຯ ໂທສະ ຯລຯ ໂມຫະເປັນເຫດ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ຮູບເປັນເຫດ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແບວນັ້ນ ຯລຯ

ສກ. ຮູບເປັນເຫດ ແຕ່ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ອະໂລພະເປັນເຫດ ແຕ່ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບເປັນເຫດ ແຕ່ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ອະໂທສະເປັນເຫດ ຯລຯ ອະໂມຫະ ຯລຯ ໂລພະ ຯລຯ ໂທສະ ຯລຯ ໂມຫະເປັນເຫດ ແຕ່ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໕໖] ປຣ. ທ່ານບໍ່ຍອມຮັບວ່າ "ຮູບເປັນເຫດ" ແມ່ນບໍ?

ສກ. ແມ່ນ

ປຣ. ມະຫາພູຕະຮູບເປັນເຫດ ໂດຍເປັນບ່ອນອາໄສແຫ່ງອຸປາທາຍະຮູບບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກມະຫາພູຕະຮູບເປັນເຫດໂດຍເປັນບ່ອນອາໄສແຫ່ງອຸປາທາຍະຮູບ ດັ່ງນັ້ນທ່ານຈຶ່ງຄວນຍອມຮັບວ່າ "ຮູບເປັນເຫດ"

**ຮູປັງເຫຕູຕິກະຖາ ຈົບ**

# ໖. ຮູປັງສະເຫຕຸກັນຕິກະຖາ (໑໖໑)

## ວ່າດ້ວຍຮູບມີເຫດ

[໗໕໗] ສກ. ຮູບມີເຫດແມ່ນບໍ?

ປຣ. ແມ່ນ

ສກ. ຮູບມີອະໂລພະເຫດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບມີເຫດໂດຍເຫດຄືອະໂທສະ ຯລຯ ໂດຍເຫດຄືອະໂມຫະ ຯລຯ ໂດຍເຫດຄືໂລພະ ຯລຯ ໂດຍເຫດຄືໂທສະ ຯລຯ ໂດຍເຫດຄືໂມຫະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບມີເຫດແມ່ນບໍ?

ປຣ. ແມ່ນ

ສກ. ຮູບຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຮູບຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈ ທ່ານກໍບໍ່ຄວນຍອມຮັບວ່າ "ຮູບມີເຫດ"

[໗໕໗] ສກ. ອະໂລພະມີເຫດ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ຮູບມີເຫດ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະໂທສະເປັນໄປກັບເຫດ ຯລຯ ອະໂມຫະ ສັດທາ ວິຣິຍະ ສະຕິ ສະມາທິ ປັນຍາ ໂລພະ ໂທສະ ໂມຫະ ມານະ ທິດຖິ ວິຈິກິດສາ ຖີນະ ອຸດທັດຈະ ອະຫິຣິກະ ອະໂນດຕັບປະ ມີເຫດ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ຮູບມີເຫດ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບມີເຫດ ແຕ່ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ອະໂລພະມີເຫດ ແຕ່ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບມີເຫດ ແຕ່ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ອະໂທສະມີເຫດ ຯລຯ ອະໂນດຕັບປະມີເຫດ ແຕ່ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໕໙] ປຣ. ທ່ານບໍ່ຍອມຮັບວ່າ "ຮູບມີເຫດ" ແມ່ນບໍ?

ສກ. ແມ່ນ

ປຣ. ຮູບມີປັດໄຈບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກຮູບມີປັດໄຈ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ຮູບມີເຫດ"

ຮູປັງສະເຫຕຸກັນຕິກະຖາ ຈົບ

# ໗. ຮູປັງກຸສະລາກຸສະລັນຕິກະຖາ (໑໖໘)

## ວ່າດ້ວຍຮູບເປັນກຸສົນແລະອະກຸສົນ

[໗໖໐] ສກ. ຮູບເປັນກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ຮູບຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ຫາກຮູບຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈ ທ່ານກໍບໍ່ຄວນຍອມຮັບວ່າ "ຮູບເປັນກຸສົນ"

[໗໖໑] ສກ. ອະໂລພະເປັນກຸສົນ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ຮູບເປັນກຸສົນ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະໂທສະເປັນກຸສົນ ຯລຯ ອະໂມຫະ ຯລຯ ສັດທາ ຯລຯ ວິຣິຍະ ຯລຯ ສະຕິ ຯລຯ ສະມາທິ ຯລຯ ປັນຍາເປັນກຸສົນ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ຮູບເປັນກຸສົນ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບເປັນກຸສົນ ແຕ່ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ອະໂລພະເປັນກຸສົນ ແຕ່ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບເປັນກຸສົນ ແຕ່ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ອະໂທສະເປັນກຸສົນ ຯລຯ ປັນຍາເປັນກຸສົນ ແຕ່ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[ກ໖໔] ສກ. ຮູບເປັນອະກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ຮູບຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຮູບຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈ ທ່ານກໍບໍ່ຄວນຍອມຮັບວ່າ "ຮູບເປັນອະກຸສົນ ຯລຯ"

[ກ໖໕] ສກ. ໂລພະເປັນອະກຸສົນ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ຮູບເປັນອະກຸສົນ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂທສະເປັນອະກຸສົນ ຯລຯ ໂມຫະ ຯລຯ ມານະ ຯລຯ ອະໂນດຕັບປະ ເປັນອະກຸສົນ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ຮູບເປັນອະກຸສົນ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບເປັນອະກຸສົນ ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ໂລພະເປັນອະກຸສົນ ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບເປັນອະກຸສົນ ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ໂທສະເປັນອະກຸສົນ ຯລຯ ໂມຫະ ຯລຯ ມານະ ຯລຯ ອະໂນດຕັບປະ ເປັນອະກຸສົນ ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

[ກ໗໔] ປຣ. ທ່ານບໍ່ຍອມຮັບວ່າ "ຮູບເປັນກຸສົນກໍມີ ເປັນອະກຸສົນກໍມີ" ແມ່ນບໍ?

ສກ. ແມ່ນ

ປຣ. ກາຍຍະກຳ ວະຈີກຳ ເປັນກຸສົນກໍມີ ເປັນອະກຸສົນກໍມີບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກກາຍຍະກຳ ວະຈີກຳ ເປັນກຸສົນກໍມີ ເປັນອະກຸສົນກໍມີ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ຮູບເປັນກຸສົນກໍມີ ເປັນອະກຸສົນກໍມີ"

**ຮູປັງກຸສະລາກຸສະລັນຕິກະຖາ ຈົບ**

## ໗. ຮູປັງວິປາໂກຕິກະຖາ (໑໗໓)

## ວ່າດ້ວຍຮູບເປັນວິບາກ

[ກ໗໕] ສກ. ຮູບເປັນວິບາກແມ່ນບໍ?

ປຣ. ແມ່ນ

ສກ. ຮູບມີສຸກຂະເວທະນາ ມີທຸກຂະເວທະນາ ມີອະທຸກຂະມະສຸຂະເວທະນາ ສຳປະຍຸດດ້ວຍສຸກຂະເວທະນາ ສຳປະຍຸດດ້ວຍທຸກຂະເວທະນາ ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ສຳປະຍຸດດ້ວຍຜັດສະ ຯລຯ ສຳປະຍຸດດ້ວຍຈິດ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

ສກ. ຮູບບໍ່ມີສຸກຂະເວທະນາ ບໍ່ມີທຸກຂະເວທະນາ ຯລຯ ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຮູບບໍ່ມີສຸກຂະເວທະນາ ບໍ່ມີທຸກຂະເວທະນາ ຯລຯ ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈ ທ່ານກໍບໍ່ຄວນຍອມຮັບວ່າ "ຮູບເປັນວິບາກ"

[໑໖໖] ສກ. ຜັດສະເປັນວິບາກ ຜັດສະມີສຸກຂະເວທະນາ ມີທຸກຂະເວທະນາ ຯລຯ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຮ. ແມ່ນ

ສກ. ຮູບເປັນວິບາກ ມີສຸກຂະເວທະນາ ມີທຸກຂະເວທະນາ ຯລຯ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຮ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບເປັນວິບາກ ບໍ່ມີສຸກຂະເວທະນາ ບໍ່ມີທຸກຂະເວທະນາ ຯລຯ ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຮ. ແມ່ນ

ສກ. ຜັດສະເປັນວິບາກ ບໍ່ມີສຸກຂະເວທະນາ ບໍ່ມີທຸກຂະເວທະນາ ຯລຯ ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຮ. ບໍ່ຄວນກ່າວແນວນັ້ນ ຯລຯ

[໑໖໗] ປຮ. ທ່ານບໍ່ຍອມຮັບວ່າ "ຮູບເປັນວິບາກ" ແມ່ນບໍ?

ສກ. ແມ່ນ

ປຮ. ສະພາວະທຳ ຄື ຈິດແລະເຈຕະສິກທີ່ເກີດຂຶ້ນຍ້ອນໄດ້ມີການເຮັດກຳໄວ້ ເປັນວິບາກ ບໍ່ແມ່ນບໍ?

ສກ. ແມ່ນ

ປຮ. ຫາກສະພາວະທຳຄືຈິດ ແລະເຈຕະສິກທີ່ເກີດຂຶ້ນຍ້ອນຄືນໄດ້ມີການເຮັດກຳໄວ້ ຈຶ່ງເປັນວິບາກ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ຮູບທີ່ເກີດຂຶ້ນຍ້ອນໄດ້ມີການເຮັດກຳໄວ້ ເປັນວິບາກ"

**ຮູປັງວິປາໂກຕິກະຖາ ຈົບ**

# ໙. ຮູປັງຮູປາວະຈະຣາຮູປາວະຈະຣັນຕິກະຖາ (໑໖໘)

## ວ່າດ້ວຍຮູບເປັນຮູບປາວະຈອນແລະອະຮູບປາວະຈອນ

[໑໖໘] ສກ. ຮູບທີ່ເປັນຮູບປາວະຈອນມີຢູ່ແມ່ນບໍ?

ປຮ. ແມ່ນ

ສກ. ຮູບເປັນເຄື່ອງສະແຫວງຫາສະມາບັດ ເປັນເຄື່ອງສະແຫວງຫາອຸບັດ ເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ປະກອບ ເກີດຮ່ວມ ຜະສົມ ສຳປະຍຸດ ເກີດພ້ອມກັນ ດັບພ້ອມກັນ ມີ

ວັດຖຸແນວດຽວກັນ ມີອາລົມແນວດຽວກັນກັບຈິດດວງທີ່ເປັນເຄື່ອງສະແຫວງຫາສະມາບັດ ດວງທີ່ເປັນເຄື່ອງສະແຫວງຫາອຸບັດ ດວງທີ່ເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຮູບບໍ່ເປັນເຄື່ອງສະແຫວງຫາສະມາບັດ ບໍ່ເປັນເຄື່ອງສະແຫວງຫາອຸບັດ ບໍ່ເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ປະກອບ ເກີດຮ່ວມ ຜະສົມ ສຳປະຍຸດ ເກີດພ້ອມກັນ ດັບພ້ອມກັນ ມີວັດຖຸແນວດຽວກັນ ມີອາລົມແນວດຽວກັນກັບຈິດດວງທີ່ບໍ່ເປັນເຄື່ອງສະແຫວງຫາສະມາບັດ ດວງທີ່ສະແຫວງຫາອຸບັດ ດວງທີ່ບໍ່ເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຮູບບໍ່ເປັນເຄື່ອງສະແຫວງຫາສະມາບັດ ບໍ່ເປັນເຄື່ອງສະແຫວງຫາອຸບັດ ບໍ່ເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ฯລฯ ມີອາລົມແນວດຽວກັນກັບຈິດດວງທີ່ບໍ່ເປັນເຄື່ອງສະແຫວງຫາສະມາບັດ ฯລฯ ທ່ານກໍບໍ່ຄວນຍອມຮັບວ່າ "ຮູບທີ່ເປັນຮູບປາວະຈອນມີຢູ່"

[໑໙] ສກ. ຮູບເປັນອະຮູບປາວະຈອນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຮູບເປັນເຄື່ອງສະແຫວງຫາສະມາບັດ ເປັນເຄື່ອງສະແຫວງຫາອຸບັດ ເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ປະກອບ ເກີດຮ່ວມ ຜະສົມ ສຳປະຍຸດ ເກີດພ້ອມກັນ ດັບພ້ອມກັນ ມີວັດຖຸແນວດຽວກັນ ມີອາລົມແນວດຽວກັນກັບຈິດດວງທີ່ເປັນເຄື່ອງສະແຫວງຫາສະມາບັດ ດວງທີ່ເປັນເຄື່ອງສະແຫວງຫາອຸບັດ ດວງທີ່ເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຮູບບໍ່ເປັນເຄື່ອງສະແຫວງຫາສະມາບັດ ບໍ່ເປັນເຄື່ອງສະແຫວງຫາອຸບັດ ບໍ່ເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ฯລฯ ມີອາລົມແນວດຽວກັນກັບຈິດດວງທີ່ບໍ່ເປັນເຄື່ອງສະແຫວງຫາສະມາບັດ ฯລฯ ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຮູບບໍ່ເປັນເຄື່ອງສະແຫວງຫາສະມາບັດ ບໍ່ເປັນເຄື່ອງສະແຫວງຫາອຸບັດ ฯລฯ ມີວັດຖຸແນວດຽວກັນ ມີອາລົມແນວດຽວກັນ ທ່ານກໍບໍ່ຄວນຍອມຮັບວ່າ ຮູບເປັນອະຮູບປາວະຈອນມີຢູ່"

[໑໑໐] ປຣ. ທ່ານບໍ່ຍອມຮັບວ່າ "ຮູບເປັນຮູບປາວະຈອນກໍມີ ເປັນອະຮູບປາວະຈອນກໍມີ" ແມ່ນບໍ?

ສກ. ແມ່ນ

ປຣ. ຮູບຊື່ວ່າເປັນກາມາວະຈອນ ຍ້ອນບຸກຄົນໄດ້ເຮັດກຳທີ່ເປັນກາມາວະຈອນໄວ້ບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກຮູບຊື່ວ່າເປັນກາມາວະຈອນ ຍ້ອນບຸກຄົນໄດ້ເຮັດກຳທີ່ເປັນກາມາວະຈອນໄວ້ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ຮູບຊື່ວ່າເປັນຮູບປາວະຈອນ ຍ້ອນບຸກຄົນໄດ້ເຮັດກຳທີ່ເປັນຮູບປາວະຈອນໄວ້ ຮູບຊື່ວ່າເປັນອະຮູບປາວະຈອນ ຍ້ອນບຸກຄົນໄດ້ເຮັດກຳທີ່ເປັນອະຮູບປາວະຈອນໄວ້"

**ຣູປັງຣູປາວະຈະຣາຣູປາວະຈະຣັນຕິກະຖາ ຈົບ**

## ໑໐. ຣູປະຣາໂຄຣູບທາດປະຣິຍາປັນໂນຕິອາທິກະຖາ (໑໗໕)

## ວ່າດ້ວຍຮູບປະຣາຄະນັບເນື່ອງໃນຮູບທາດ ເປັນຕົ້ນ

[໗໗໑] ສກ. ຮູບປະຣາຄະນັບເນື່ອງໃນຮູບທາດແມ່ນບໍ?

ປຣ. ແມ່ນ

ສກ. ຮູບປະຣາຄະເປັນເຄື່ອງສະແຫວງຫາສະມາບັດ ເປັນເຄື່ອງສະແຫວງຫາອຸບັດ ເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ປະກອບ ຜະສົມ ສຳປະຍຸດ ເກີດພ້ອມກັນ ດັບພ້ອມກັນ ມີວັດຖຸແນວດຽວກັນ ມີອາລົມແນວດຽວກັນກັບຈິດດວງທີ່ເປັນເຄື່ອງສະແຫວງຫາສະມາບັດ ດວງທີ່ເປັນເຄື່ອງສະແຫວງຫາອຸບັດ ດວງທີ່ເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບປະຣາຄະບໍ່ເປັນເຄື່ອງສະແຫວງຫາສະມາບັດ ບໍ່ເປັນເຄື່ອງສະແຫວງຫາອຸບັດ ບໍ່ເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ຯລຯ ມີວັດຖຸແນວດຽວກັນ ມີອາລົມແນວດຽວກັນກັບຈິດດວງທີ່ບໍ່ເປັນເຄື່ອງສະແຫວງຫາສະມາບັດ ຯລຯ ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຮູບປະຣາຄະບໍ່ເປັນເຄື່ອງສະແຫວງຫາສະມາບັດ ບໍ່ເປັນເຄື່ອງສະແຫວງຫາອຸບັດ ບໍ່ເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ຯລຯ ມີວັດຖຸແນວດຽວກັນ ມີອາລົມແນວດຽວກັນກັບຈິດດວງທີ່ບໍ່ເປັນເຄື່ອງສະແຫວງຫາສະມາບັດ ຯລຯ ທ່ານກໍບໍ່ຄວນຍອມຮັບວ່າ "ຮູບປະຣາຄະນັບເນື່ອງໃນຮູບທາດ"

[໗໗໔] ສກ. ຮູບປະຣາຄະນັບເນື່ອງໃນຮູບທາດແມ່ນບໍ?

ປຣ. ແມ່ນ

ສກ. ສັດທະຣາຄະນັບເນື່ອງໃນສັດທະທາດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຮູບປະຣາຄະນັບເນື່ອງໃນຮູບທາດແມ່ນບໍ?

ປຣ. ແມ່ນ

ສກ. ຄັນທະຣາຄະ ຯລຯ ຣະສະຣາຄະ ຯລຯ ໂຜດຖັບພະຣາຄະ ນັບເນື່ອງໃນໂຜດຖັບພະທາດ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສັດທະຣາຄະ ທ່ານບໍ່ຍອມຮັບວ່າ "ນັບເນື່ອງໃນສັດທະທາດ" ແມ່ນບໍ?

ປຣ. ແມ່ນ

ສກ. ຣູບປະຣາຄະ ທ່ານບໍ່ຍອມຮັບວ່າ "ນັບເນື່ອງໃນຣູບທາດ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄັນທະຣາຄະ ຯລຯ ຣະສະຣາຄະ ຯລຯ ໂຜດຖັບພະຣາຄະ ທ່ານບໍ່ຍອມຮັບວ່າ "ນັບເນື່ອງໃນໂຜດຖັບພະທາດ" ແມ່ນບໍ?

ປຣ. ແມ່ນ

ສກ. ຣູບປະຣາຄະ ທ່ານບໍ່ຍອມຮັບວ່າ "ນັບເນື່ອງໃນຣູບທາດ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໗໖] ສກ. ອະຣູບປະຣາຄະນັບເນື່ອງໃນອະຣູບທາດແມ່ນບໍ?

ປຣ. ແມ່ນ

ສກ. ອະຣູບປະຣາຄະ ທ່ານບໍ່ຍອມຮັບວ່າ "ນັບເນື່ອງໃນອະຣູບທາດ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະຣູບປະຣາຄະນັບເນື່ອງໃນອະຣູບທາດແມ່ນບໍ?

ປຣ. ແມ່ນ

ສກ. ອະຣູບປະຣາຄະເປັນເຄື່ອງສະແຫວງຫາສະມາບັດ ເປັນເຄື່ອງສະແຫວງຫາອຸບັດ ເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ປະກອບ ເກີດຮ່ວມ ຜະສົມ ສຳປະຍຸດ ເກີດພ້ອມກັນ ດັບພ້ອມກັນ ມີວັດຖຸແນວດຽວກັນ ມີອາລົມແນວດຽວກັນກັບຈິດດວງທີ່ເປັນເຄື່ອງສະແຫວງຫາສະມາບັດ ດວງທີ່ເປັນເຄື່ອງສະແຫວງຫາອຸບັດ ດວງທີ່ເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະຣູບປະຣາຄະບໍ່ເປັນເຄື່ອງສະແຫວງຫາສະມາບັດ ບໍ່ເປັນເຄື່ອງສະແຫວງຫາອຸບັດ ບໍ່ເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ຯລຯ ມີວັດຖຸເປັນອັນດຽວກັນ ມີອາລົມເປັນອັນດຽວກັນກັບຈິດດວງທີ່ບໍ່ເປັນເຄື່ອງສະແຫວງຫາສະມາບັດ ຯລຯ ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກອະຣູບປະຣາຄະບໍ່ເປັນເຄື່ອງສະແຫວງຫາສະມາບັດ ບໍ່ເປັນເຄື່ອງສະແຫວງຫາອຸບັດ ບໍ່ເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ປະກອບ ເກີດຮ່ວມ ຜະສົມ ສຳປະຍຸດ ເກີດພ້ອມກັນ ດັບພ້ອມກັນ ມີວັດຖຸແນວດຽວກັນ ມີອາລົມແນວດຽວກັນກັບຈິດດວງທີ່ບໍ່ເປັນເຄື່ອງສະແຫວງຫາສະ

ມາບັດ ດວງທີ່ບໍ່ເປັນເຄື່ອງສະແຫວງຫາອຸບັດ ດວງທີ່ບໍ່ເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ທ່ານກໍບໍ່ຄວນຍອມຮັບວ່າ "ອະຣູບປະຣາຄະນັບເນື່ອງໃນອະຣູບທາດ"

[໗໗໔] ສກ. ອະຣູບປະຣາຄະນັບເນື່ອງໃນອະຣູບທາດແມ່ນບໍ?

ປຣ. ແມ່ນ

ສກ. ສັດທະຣາຄະນັບເນື່ອງໃນສັດທະທາດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະຣູບປະຣາຄະນັບເນື່ອງໃນອະຣູບທາດແມ່ນບໍ?

ປຣ. ແມ່ນ

ສກ. ຄັນທະຣາຄະ ຯລຯ ຣະສະຣາຄະ ຯລຯ ໂຜດຖັບພະຣາຄະ ນັບເນື່ອງໃນໂຜດຖັບພະທາດ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສັດທະຣາຄະ ທ່ານບໍ່ຍອມຮັບວ່າ "ນັບເນື່ອງໃນສັດທະທາດ" ແມ່ນບໍ?

ປຣ. ແມ່ນ

ສກ. ອະຣູບປະຣາຄະ ທ່ານບໍ່ຍອມຮັບວ່າ "ນັບເນື່ອງໃນອະຣູບທາດ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄັນທະຣາຄະ ຯລຯ ຣະສະຣາຄະ ຯລຯ ໂຜດຖັບພະຣາຄະ ທ່ານບໍ່ຍອມຮັບວ່າ "ນັບເນື່ອງໃນໂຜດຖັບພະທາດ" ແມ່ນບໍ?

ປຣ. ແມ່ນ

ສກ. ອະຣູບປະຣາຄະ ທ່ານບໍ່ຍອມຮັບວ່າ "ນັບເນື່ອງໃນອະຣູບທາດ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໗໕] ປຣ. ທ່ານບໍ່ຍອມຮັບວ່າ "ຣູບປະຣາຄະນັບເນື່ອງໃນຣູບທາດ ອະຣູບປະຣາຄະນັບເນື່ອງ ໃນອະຣູບທາດ" ແມ່ນບໍ?

ສກ. ແມ່ນ

ປຣ. ກາມຣາຄະນັບເນື່ອງໃນກາມທາດບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກກາມຣາຄະນັບເນື່ອງໃນກາມທາດ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ຣູບປະຣາຄະ ນັບເນື່ອງໃນຣູບທາດ ອະຣູບປະຣາຄະນັບເນື່ອງໃນອະຣູບທາດ"

**ຣູປະຣາໂຄຣູປະທາຕຸປະຣິຍາປັນໂນຕິອາທິກະຖາ ຈົບ**

**ໂສລະສະມະວັກ ຈົບ**

### ລວມກະຖາທີ່ມີໃນວັກນີ້ ຄື

໑. ນິກຄະຫະກະຖາ
໒. ປັກຄະຫະກະຖາ
໓. ສຸຂານຸບປະທານະກະຖາ
໔. ອະທິໄຄຫະມະນະສິກາຣະກະຖາ
໕. ຣູປັງເຫຕູຕິກະຖາ
໖. ຣູປັງສະເຫຕຸກັນຕິກະຖາ
໗. ຣູປັງກຸສະລາກຸສະລັນຕິກະຖາ
໘. ຣູປັງວິປາໂກຕິກະຖາ
໙. ຣູປັງຣູປາວະຈະຣາຣູປາວະຈະຣັນຕິກະຖາ
໑໐. ຣູປະຣາໂຄຣູປະທາຕຸປະຣິຍາປັນໂນຕິອາທິກະຖາ

# ໑໗. ສັດຕະຣະສະມະວັກ

## ໑. ອັດຖິອະຣະຫະໂຕປຸນຍູປັດຈະໂຍຕິກະຖາ (໑໖໖)

### ວ່າດ້ວຍພຣະອະຣະຫັນມີການສັ່ງສົມບຸນ

[໗໗໖] ສກ. ພຣະອະຣະຫັນມີການສັ່ງສົມບຸນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນມີການສັ່ງສົມບາບແມ່ນບໍ?

ປຣ. ບໍ່ຄວນກ່າວແບວນັ້ນ ຯລຯ

ສກ. ພຣະອະຣະຫັນບໍ່ມີການສັ່ງສົມບາບແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນບໍ່ມີການສັ່ງສົມບຸນແມ່ນບໍ?

ປຣ. ບໍ່ຄວນກ່າວແບວນັ້ນ ຯລຯ

[໗໗໗] ສກ. ພຣະອະຣະຫັນມີການສັ່ງສົມບຸນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນສ້າງສົມປຸນຍາພິສັງຂານ ອາເນນຊາພິສັງຂານ ເຮັດກຳທີ່ເປັນໄປເພື່ອຄະຕິ ເພື່ອພົບ ເພື່ອຄວາມເປັນຜູ້ມີອຳນາດ ເພື່ອຄວາມເປັນໃຫຍ່ (ໃນແຜ່ນດິນ) ເພື່ອມີສົມບັດຫຼາຍ ເພື່ອມີບໍລິວານຫຼາຍ ເພື່ອຄວາມງາມໃນໝູ່ເທບ ເພື່ອຄວາມງາມໃນມະນຸດແມ່ນບໍ?

ປຣ. ບໍ່ຄວນກ່າວແບວນັ້ນ ຯລຯ

[໗໗໘] ສກ. ພຣະອະຣະຫັນມີການສັ່ງສົມບຸນແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຍັງສັ່ງສົມຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ພຣະອະຣະຫັນບໍ່ສັ່ງສົມແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ພຣະອະຣະຫັນລະ ฯລฯ ພຣະອະຣະຫັນຍັງຍຶດໝັ້ນ ฯລฯ ພຣະອະຣະຫັນຍັງກໍາຈັດຢູ່ ฯລฯ ພຣະອະຣະຫັນຍັງກໍ່ຢູ່ ฯລฯ ພຣະອະຣະຫັນຍັງທໍາລາຍຢູ່ ฯລฯ ພຣະອະຣະຫັນຍັງປັບປຸງຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ພຣະອະຣະຫັນສັ່ງສົມຢູ່ກໍບໍ່ແມ່ນ ບໍ່ສັ່ງສົມຢູ່ກໍບໍ່ແມ່ນ ແຕ່ເປັນຜູ້ບໍ່ສັ່ງສົມແລ້ວດໍາລົງຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະອະຣະຫັນສັ່ງສົມຢູ່ກໍບໍ່ແມ່ນ ບໍ່ສັ່ງສົມຢູ່ກໍບໍ່ແມ່ນ ແຕ່ເປັນຜູ້ບໍ່ສັ່ງສົມແລ້ວດໍາລົງຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ພຣະອະຣະຫັນມີການສັ່ງສົມບຸນ"

ສກ. ພຣະອະຣະຫັນລະຢູ່ກໍບໍ່ແມ່ນ ຍຶດໝັ້ນຢູ່ກໍບໍ່ແມ່ນ ແຕ່ເປັນຜູ້ລະແລ້ວດໍາລົງຢູ່ ฯລฯ ກໍາຈັດຢູ່ກໍບໍ່ແມ່ນ ກໍ່ຢູ່ກໍບໍ່ແມ່ນ ແຕ່ເປັນຜູ້ກໍາຈັດແລ້ວດໍາລົງຢູ່ ฯລฯ ທໍາລາຍຢູ່ກໍບໍ່ແມ່ນ ປັບປຸງຢູ່ກໍບໍ່ແມ່ນ ແຕ່ເປັນຜູ້ທໍາລາຍແລ້ວດໍາລົງຢູ່ ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະອະຣະຫັນທໍາລາຍຢູ່ກໍບໍ່ແມ່ນ ປັບປຸງຢູ່ກໍບໍ່ແມ່ນ ແຕ່ເປັນຜູ້ທໍາລາຍແລ້ວດໍາລົງຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ພຣະອະຣະຫັນມີການສັ່ງສົມບຸນ"

[ກຸກຸລ] ປຣ. ພຣະອະຣະຫັນບໍ່ມີການສັ່ງສົມບຸນແມ່ນບໍ?

ສກ. ແມ່ນ

ປຣ. ພຣະອະຣະຫັນຍັງໃຫ້ທານແມ່ນບໍ?

ສກ. ແມ່ນ

ປຣ. ຫາກພຣະອະຣະຫັນຍັງໃຫ້ທານ ທ່ານກໍບໍ່ຄວນຍອມຮັບວ່າ "ພຣະອະຣະຫັນບໍ່ມີການສັ່ງສົມບຸນ"

ປຣ. ພຣະອະຣະຫັນຍັງຖວາຍຈີວອນ ฯລฯ ບິນທະບາດ ฯລฯ ເສນາສະນະ ฯລฯ ຄິລານະປັດໄຈເພສັດບໍຣິຂານ ฯລฯ ຂອງຫຍໍ້າ ฯລฯ ຂອງບໍຣິໂພກ ฯລฯ ນໍ້າດື່ມ ฯລฯ ຍັງໄຫວ້ພຣະເຈດີ ฯລฯ ຍັງຍົກດອກໄມ້ ฯລฯ ຂອງຫອມ ฯລฯ ເຄື່ອງລູບທາຂຶ້ນໄວ້ເທິງພຣະເຈດີ ฯລฯ ຍັງກະທໍາປະທັກຂິນພຣະເຈດີແມ່ນບໍ?

ສກ. ແມ່ນ

ປຣ. ຫາກພຣະອະຣະຫັນ ຍັງທຳປະທັກຂິນພຣະເຈດີ ທ່ານກໍບໍ່ຄວນຍອມຮັບວ່າ "ພຣະອະຣະຫັນບໍ່ມີການສັ່ງສົມບຸນ"

**ອັດຖິອະຣະຫະໂຕປຸນຍູປັດຈະໂຍຕິກະຖາ ຈົບ**

# ໘. ນັດຖິອະຣະຫະໂຕອະກາລະມັດຈູຕິກະຖາ (໑ໝາ)

## ວ່າດ້ວຍພຣະອະຣະຫັນບໍ່ມີອະກາລະມໍຣະນະ

[ກ໗໐] ສກ. ພຣະອະຣະຫັນບໍ່ມີອະກາລະມໍຣະນະ ແມ່ນບໍ?

ປຣ. ແມ່ນ

ສກ. ຜູ້ຂ້າພຣະອະຣະຫັນບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຜູ້ຂ້າພຣະອະຣະຫັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນບໍ່ມີອະກາລະມໍຣະນະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນບໍ່ມີອະກາລະມໍຣະນະແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນປົງຊີວິດພຣະອະຣະຫັນໄດ້ເມື່ອຍັງມີອາຍຸເຫຼືອຢູ່ ຫຼື ປົງຊີວິດໄດ້ເມື່ອໝົດອາຍຸແມ່ນບໍ?

ປຣ. ປົງຊີວິດໄດ້ເມື່ອຍັງມີອາຍຸເຫຼືອຢູ່

ສກ. ຫາກບຸກຄົນປົງຊີວິດໄດ້ເມື່ອຍັງມີອາຍຸເຫຼືອຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ພຣະອະຣະຫັນບໍ່ມີອະກາລະມໍຣະນະ"

ສກ. ບຸກຄົນປົງຊີວິດພຣະອະຣະຫັນໄດ້ເມື່ອໝົດອາຍຸ ຍ້ອນເຫດນັ້ນ ຜູ້ຂ້າພຣະອະຣະຫັນຈຶ່ງບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[ກ໗໑] ສກ. ພຣະອະຣະຫັນບໍ່ມີອະກາລະມໍຣະນະແມ່ນບໍ?

ປຣ. ແມ່ນ

ສກ. ຢາພິດ ອາວຸດ ໄຟ ບໍ່ເພິ່ງເຮັດຫຍັງເຂົ້າໄປໃນຮ່າງກາຍຂອງພຣະອະຣະຫັນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຢາພິດ ອາວຸດ ໄຟ ເພິ່ງແຊກຊຶມເຂົ້າໄປໃນຮ່າງກາຍຂອງພຣະອະຣະຫັນໄດ້ ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຢາພິດ ອາວຸດ ໄຟ ເພິ່ງແຊກຊຶມເຂົ້າໄປໃນຮ່າງກາຍຂອງພຣະອະຣະຫັນໄດ້ ທ່ານກໍບໍ່ຄວນຍອມຮັບວ່າ "ພຣະອະຣະຫັນບໍ່ມີອະກາລະມໍຣະນະ"

ສກ. ຢາພິດ ອາວຸດ ໄຟ ບໍ່ເພິ່ງແຊກຊຶມເຂົ້າໄປໃນຮ່າງກາຍຂອງພຣະອະຣະຫັນແມ່ນບໍ?

ປຣ. ແມ່ນ

ສກ. ຜູ້ຂ້າພຣະອະຣະຫັນບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໘໔] ປຣ. ພຣະອະຣະຫັນມີອະກາລະມໍຣະນະແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ເຮົາຈະບໍ່ກ່າວກຳທີ່ສັດມີເຈຕະນາເຮັດໄວ້ ສັ່ງສົມໄວ້ວ່າ ສິ້ນສຸດ ຍ້ອນຍັງບໍ່ສະເຫວີຍຜົນ ກໍຜົນນັ້ນແລ ສັດຕ້ອງສະເຫວີຍໃນອັດຕະພາບນີ້ ໃນອັດຕະພາບຖັດໄປ ຫຼື ໃນອັດຕະພາບຕໍ່ ໆ ໄປ" ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ພຣະອະຣະຫັນຈຶ່ງບໍ່ມີອະກາລະມໍຣະນະ

**ນັດຖິອະຣະຫະໂຕອະກາລະມັດຈູຕິກະຖາ ຈົບ**

## ໓. ສັບພະມິທັງກຳມະໂຕຕິກະຖາ (໑໖໗)
## ວ່າດ້ວຍສິ່ງທັງປວງນີ້ເປັນໄປຍ້ອນກຳ

[໗໘໓] ສກ. ສິ່ງທັງປວງ ນີ້ເປັນໄປຍ້ອນກຳແມ່ນບໍ?

ປຣ. ແມ່ນ

ສກ. ແມ່ນແຕ່ກຳເອງກໍເປັນໄປຍ້ອນກຳແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສິ່ງທັງປວງນີ້ເປັນໄປຍ້ອນກຳແມ່ນບໍ?

ປຣ. ແມ່ນ

ສກ. ສິ່ງທັງປວງນີ້ເປັນໄປຍ້ອນເຫດທີ່ເຮັດໄວ້ກ່ອນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສິ່ງທັງປວງນີ້ເປັນໄປຍ້ອນກຳແມ່ນບໍ?

ປຣ. ແມ່ນ

ສກ. ສິ່ງທັງປວງນີ້ເປັນໄປຍ້ອນວິບາກຂອງກຳແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

[ກຖ໘] ສກ. ສິ່ງທັງປວງນີ້ເປັນໄປຍ້ອນວິບາກຂອງກຳແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນເພິ່ງຂ້າສັດ ຍ້ອນວິບາກຂອງກຳແມ່ນບໍ?

ປຣ. ແມ່ນ

ສກ. ປານາຕິບາດມີຜົນແມ່ນບໍ?

ປຣ. ແມ່ນ

ສກ. ກຳວິບາກມີຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ກຳວິບາກບໍ່ມີຜົນແມ່ນບໍ?

ປຣ. ແມ່ນ

ສກ. ປານາຕິບາດບໍ່ມີຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ບຸກຄົນເພິ່ງລັກຊັບ ໆລໆ ເວົ້າຕົວະ ໆລໆ ເວົ້າສັບສໍ່ ໆລໆ ເວົ້າຄຳຫຍາບ ໆລໆ ເວົ້າໂລເລ ໆລໆ ຕັດປ່ອງຍ່ອງເບົາ ໆລໆ ປຸ້ນສະດົມ ໆລໆ ປຸ້ນເຮືອນຫຼັງດຽວ ໆລໆ ດັກປຸ້ນໃນທາງປ່ຽວ ໆລໆ ຜິດເມຍຜູ້ອື່ນ ໆລໆ ປຸ້ນຊາວບ້ານ ໆລໆ ປຸ້ນຊາວນິຄົມ ໆລໆ ເພິ່ງຖວາຍທານ ໆລໆ ຈີວອນ ໆລໆ ບິນທະບາດ ໆລໆ ເສນາສະນະ ໆລໆ ຄິລານະປັດໄຈເພສັດບໍຣິຂານ ຍ້ອນວິບາກຂອງກຳແມ່ນບໍ?

ປຣ. ແມ່ນ

ສກ. ຄິລານະປັດໄຈເພສັດບໍຣິຂານມີຜົນແມ່ນບໍ?

ປຣ. ແມ່ນ

ສກ. ກຳວິບາກມີຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ກຳວິບາກບໍ່ມີຜົນແມ່ນບໍ?

ປຣ. ແມ່ນ

ສກ. ຄິລານະປັດໄຈເພສັດບໍຣິຂານບໍ່ມີຜົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

[ກຖ໕] ປຣ. ທ່ານບໍ່ຍອມຮັບວ່າ "ສິ່ງທັງປວງນີ້ເປັນໄປຍ້ອນກຳ" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ສັດໂລກຍ່ອມເປັນໄປຕາມກຳ
ໝູ່ສັດເປັນໄປຕາມກຳ
ສັດທັງຫຼາຍມີກຳເປັນເຄື່ອງຜູກພັນ
ປຽບເໝືອນລົດມີໝຸດເປັນເຄື່ອງຕຶງໄວ້ ແລ່ນໄປຢູ່ສັນນັ້ນ
ບຸກຄົນໄດ້ກຽດ ຄວາມສັນເສີນ
ຄວາມເສື່ອມ ການຖືກຂ້າ ແລະການຖືກຈອງຈຳກໍຍ້ອນກຳ
ບຸກຄົນຮູ້ຊັດແຈ້ງກຳນັ້ນທີ່ເຮັດໃຫ້ຕ່າງກັນໄດ້
ແລ້ວເປັນຫຍັງນໍ ຈະເພິ່ງກ່າວວ່າກຳບໍ່ມີໃນໂລກ"

ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ສິ່ງທັງປວງນີ້ຈຶ່ງເປັນໄປຍ້ອນກຳ

**ສັບພະມີທັງກຳມະໂຕຕິກະຖາ ຈົບ**

# ໔. ອິນທະຣິຍະພັດທະກະຖາ (໑໖໙)

## ວ່າດ້ວຍສິ່ງທີ່ເນື່ອງດ້ວຍອິນຊີ

[໗໕໖] ສກ. ສິ່ງທີ່ເນື່ອງດ້ວຍອິນຊີເທົ່ານັ້ນເປັນທຸກ ແມ່ນບໍ?

ປຣ. ແມ່ນ

ສກ. ສິ່ງທີ່ເນື່ອງດ້ວຍອິນຊີເທົ່ານັ້ນບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສປັດໄຈເກີດຂຶ້ນ ມີຄວາມສິ້ນໄປ ເສື່ອມໄປ ຄາຍອອກ ດັບໄປ ແປຜັນໄປເປັນທຳມະດາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ສິ່ງທີ່ບໍ່ເນື່ອງດ້ວຍອິນຊີບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສປັດໄຈເກີດຂຶ້ນ ມີຄວາມສິ້ນໄປ ເສື່ອມໄປ ຄາຍອອກ ດັບໄປ ແປຜັນໄປເປັນທຳມະດາບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກສິ່ງທີ່ບໍ່ເນື່ອງດ້ວຍອິນຊີບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສປັດໄຈເກີດຂຶ້ນ ມີຄວາມສິ້ນໄປ ເສື່ອມໄປ ຄາຍອອກ ດັບໄປ ແປຜັນໄປເປັນທຳມະດາ ທ່ານກໍບໍ່ຄວນຍອມຮັບວ່າ "ສິ່ງທີ່ເນື່ອງດ້ວຍອິນຊີເທົ່ານັ້ນເປັນທຸກ"

ສກ. ສິ່ງທີ່ບໍ່ເນື່ອງດ້ວຍອິນຊີບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສປັດໄຈເກີດຂຶ້ນ ຯລຯ ມີຄວາມແປຜັນໄປເປັນທຳມະດາ ແຕ່ສິ່ງນັ້ນບໍ່ເປັນທຸກແມ່ນບໍ?

ປຣ. ແມ່ນ

ສກ. ສິ່ງທີ່ເນື່ອງດ້ວຍອິນຊີບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ຯລຯ ມີຄວາມແປຜັນໄປເປັນທຳມະດາ ແຕ່ສິ່ງນັ້ນບໍ່ເປັນທຸກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສິ່ງທີ່ເນື່ອງດ້ວຍອິນຊີບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ຯລຯ ມີຄວາມແປຜັນໄປເປັນທຳມະດາ ແຕ່ສິ່ງນັ້ນເປັນທຸກແມ່ນບໍ?

ປຣ. ແມ່ນ

ສກ. ສິ່ງທີ່ບໍ່ເນື່ອງດ້ວຍອິນຊີບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ຯລຯ ມີຄວາມແປຜັນໄປເປັນທຳມະດາ ແຕ່ສິ່ງນັ້ນເປັນທຸກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[ກ໙໗] ສກ. ສິ່ງທີ່ເນື່ອງດ້ວຍອິນຊີເທົ່ານັ້ນເປັນທຸກແມ່ນບໍ?

ປຣ. ແມ່ນ

ສກ. ພຣະຜູ້ມີພຣະພາກເຈົ້າຕັດວ່າ "ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ສິ່ງທີ່ບໍ່ເນື່ອງດ້ວຍອິນຊີກໍບໍ່ທ່ຽງ" ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະຜູ້ມີພຣະພາກຕັດວ່າ "ສິ່ງທີ່ບໍ່ທ່ຽງເປັນທຸກ ສິ່ງທີ່ບໍ່ເນື່ອງດ້ວຍອິນຊີບໍ່ທ່ຽງ" ທ່ານກໍບໍ່ຄວນຍອມຮັບວ່າ "ສິ່ງທີ່ເນື່ອງດ້ວຍອິນຊີເທົ່ານັ້ນເປັນທຸກ"

[ກ໙໘] ປຣ. ທ່ານບໍ່ຍອມຮັບວ່າ "ສິ່ງທີ່ເນື່ອງດ້ວຍອິນຊີເທົ່ານັ້ນເປັນທຸກ" ແມ່ນບໍ?

ສກ. ແມ່ນ

ປຣ. ບຸກຄົນຢູ່ປະພຶດພົມມະຈັນໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ເພື່ອກຳນົດຮູ້ທຸກທີ່ບໍ່ເນື່ອງດ້ວຍອິນຊີ ເໝືອນກຳນົດຮູ້ທຸກທີ່ເນື່ອງດ້ວຍອິນຊີແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ທຸກທີ່ບໍ່ເນື່ອງດ້ວຍອິນຊີທີ່ພຣະອະຣິຍະກຳນົດຮູ້ແລ້ວ ຍ່ອມບໍ່ເກີດຂຶ້ນອີກ ເໝືອນທຸກທີ່ເນື່ອງດ້ວຍອິນຊີທີ່ພຣະອະຣິຍະກຳນົດຮູ້ແລ້ວ ຍ່ອມບໍ່ເກີດຂຶ້ນອີກແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ດັ່ງນັ້ນ ສິ່ງທີ່ເນື່ອງດ້ວຍອິນຊີເທົ່ານັ້ນຈຶ່ງເປັນທຸກ

**ອິນທະຣິຍະພັດທະກະຖາ ຈົບ**

# ៥. ຖະເປຕະວາອະຣິຍະມັກຄັນຕິກະຖາ (໑໗໐)

## ວ່າດ້ວຍການຍົກເວັ້ນອະຣິຍະມັກ

[໗໘໙] ສກ. ຍົກເວັ້ນອະຣິຍະມັກ ສັງຂານທີ່ເຫຼືອເປັນທຸກແມ່ນບໍ?

ປຣ. ແມ່ນ

ສກ. ແມ່ນທຸກຂະສະມຸໄທກໍເປັນທຸກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ແມ່ນທຸກຂະສະມຸໄທກໍເປັນທຸກແມ່ນບໍ?

ປຣ. ແມ່ນ

ສກ. ອະຣິຍະສັດມີພຽງ ໓ ຢ່າງເທົ່ານັ້ນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະຣິຍະສັດມີພຽງ ໓ ຢ່າງເທົ່ານັ້ນແມ່ນບໍ?

ປຣ. ແມ່ນ

ສກ. ອະຣິຍະສັດ ພຣະຜູ້ມີພຣະພາກໄດ້ຕັດໄວ້ ໔ ຢ່າງ ຄື (໑) ທຸກ (໒) ທຸກຂະສະມຸໄທ (໓) ທຸກຂະນິໂຣທະ (໔) ທຸກຂະນິໂຣທະຄາມິນີປະຕິປະທາບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກອະຣິຍະສັດ ພຣະຜູ້ມີພຣະພາກໄດ້ຕັດໄວ້ ໔ ຢ່າງ ຄື (໑) ທຸກ (໒) ທຸກຂະສະມຸໄທ (໓) ທຸກຂະນິໂຣທະ (໔) ທຸກຂະນິໂຣທະຄາມິນີປະຕິປະທາ ທ່ານກໍບໍ່ຄວນຍອມຮັບວ່າ "ອະຣິຍະສັດມີພຽງ ໓ ຢ່າງ ເທົ່ານັ້ນ"

ສກ. ແມ່ນທຸກຂະສະມຸໄທກໍເປັນທຸກແມ່ນບໍ?

ປຣ. ແມ່ນ

ສກ. ໂດຍຄວາມໝາຍວ່າແນວໃດ?

ປຣ. ໂດຍຄວາມໝາຍວ່າບໍ່ທ່ຽງ

ສກ. ອະຣິຍະມັກບໍ່ທ່ຽງແມ່ນບໍ?

ປຣ. ແມ່ນ

ສກ. ອະຣິຍະມັກເປັນທຸກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະຣິຍະມັກບໍ່ທ່ຽງ ແຕ່ອະຣິຍະມັກນັ້ນບໍ່ເປັນທຸກແມ່ນບໍ?

ປຣ. ແມ່ນ

ສກ. ທຸກຂະສະມຸໄທບໍ່ທ່ຽງ ແຕ່ອະຣິຍະມັກນັ້ນບໍ່ເປັນທຸກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ທຸກຂະສະມຸໄທບໍ່ທັງໆ ແຕ່ອະຣິຍະມັກນັ້ນເປັນທຸກແມ່ນບໍ?

ປຣ. ແມ່ນ

ສກ. ອະຣິຍະມັກບໍ່ທັງໆ ແຕ່ອະຣິຍະມັກນັ້ນເປັນທຸກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໗໙໐] ປຣ. ທ່ານບໍ່ຍອມຮັບວ່າ "ຍົກເວັ້ນອະຣິຍະມັກ ສັງຂານທີ່ເຫຼືອເປັນທຸກ" ແມ່ນບໍ?

ສກ. ແມ່ນ

ປຣ. ອະຣິຍະມັກເປັນທຸກຂະນິໂຣທະຄາມີນີປະຕິປະທາບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກອະຣິຍະມັກເປັນທຸກຂະນິໂຣທະຄາມີນີປະຕິປະທາ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ຍົກເວັ້ນອະຣິຍະມັກ ສັງຂານທີ່ເຫຼືອເປັນທຸກ"

**ຖະເປຕະວາອະຣິຍະມັກຄັນຕິກະຖາ ຈົບ**

# ໖. ນະວັດຕັບພັງສັງໂຄທັກຂິນັງປະຕິຄະຄັນທາຕິຕິກະຖາ (໑໗໑)

## ວ່າດ້ວຍບໍ່ຄວນຍອມຮັບວ່າພຣະສົງຮັບທັກຂິນາ

[໗໙໑] ສກ. ທ່ານບໍ່ຍອມຮັບວ່າ "ພຣະສົງຮັບທັກຂິນາໄດ້" ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສົງເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນເນື້ອນາບຸນອັນປະເສີດຂອງໂລກແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະສົງເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນເນື້ອນາບຸນອັນປະເສີດຂອງໂລກ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ພຣະສົງຮັບທັກຂິນາໄດ້"

ສກ. ທ່ານບໍ່ຍອມຮັບວ່າ "ພຣະສົງຮັບທັກຂິນາໄດ້" ແມ່ນບໍ?

ປຣ. ແມ່ນ

ສກ. ອະຣິຍະບຸກຄົນ ໔ ຄູ່ ຄື ໘ ບຸກຄົນ ພຣະຜູ້ມີພຣະພາກເຈົ້າຕັດວ່າ ເປັນຜູ້ຄວນແກ່ທັກຂິນາບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກອະຣິຍະບຸກຄົນ ໔ ຄູ່ ຄື ໘ ບຸກຄົນ ພຣະຜູ້ມີພຣະພາກເຈົ້າຕັດວ່າ ເປັນຜູ້ຄວນແກ່ທັກຂິນາ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ພຣະສົງຮັບທັກຂິນາໄດ້"

ສກ. ທ່ານບໍ່ຍອມຮັບວ່າ "ພຣະສົງຮັບທັກຂິນາໄດ້" ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນບາງພວກທີ່ຖວາຍທານແດ່ພຣະສົງມີຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນບາງພວກທີ່ຖວາຍທານແດ່ພຣະສົງມີຢູ່ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ພຣະສົງຮັບທັກຂິນາໄດ້"

ສກ. ບຸກຄົນບາງພວກທີ່ຖວາຍຈີວອນ ຯລຯ ບິນທະບາດ ຯລຯ ເສນາສະນະ ຯລຯ ຄິລານະປັດໄຈເພສັດບໍຣິຂານ ຯລຯ ຂອງຫຍ້ຳ ຯລຯ ຂອງບໍຣິໂພກ ຯລຯ ນ້ຳດື່ມ ແດ່ພຣະສົງມີຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນບາງພວກທີ່ຖວາຍນ້ຳດື່ມ ແດ່ພຣະສົງມີຢູ່ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ພຣະສົງຮັບທັກຂິນາໄດ້"

ສກ. ທ່ານບໍ່ຍອມຮັບວ່າ "ພຣະສົງຮັບທັກຂິນາໄດ້" ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ພຣະສົງຜູ້ເຖິງພ້ອມດ້ວຍສະມາທິ ຍ່ອມຮັບທັກຂິນາໄດ້ເໝືອນໄຟຮັບການບູຊາ ເໝືອນແຜ່ນດິນຮັບນ້ຳຝົນຈາກເມກ"

ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ພຣະສົງຈຶ່ງຮັບທັກຂິນາໄດ້

[໗໙໔] ປຣ. ພຣະສົງຮັບທັກຂິນາໄດ້ແມ່ນບໍ?

ສກ. ແມ່ນ

ປຣ. ມັກຮັບໄດ້ ຜົນກໍຮັບໄດ້ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

**ນະວັດຕັບພັງສັງໂຄທັກຂິນັງປະຕິຄະຄັນຫາຕີຕິກະຖາ ຈົບ**

## ໗. ນະວັດຕັບພັງສັງໂຄທັກຂິນັງວິໂສເທຕີຕິກະຖາ (໑໗໔)

## ວ່າດ້ວຍບໍ່ຄວນຍອມຮັບວ່າພຣະສົງເຮັດທັກຂິນາໃຫ້ບໍລິສຸດ

[໗໙໕] ສກ. ທ່ານບໍ່ຍອມຮັບວ່າ "ພຣະສົງເຮັດທັກຂິນາໃຫ້ບໍລິສຸດໄດ້" ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສົງເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນເນື້ອນາບຸນອັນປະເສີດຂອງໂລກບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະສົງເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຯລຯ ເປັນເນື້ອນາບຸນອັນປະເສີດຂອງໂລກ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ພຣະສົງເຮັດທັກຂິນາໃຫ້ມົດຈົດໄດ້"

ສກ. ທ່ານບໍ່ຍອມຮັບວ່າ "ພຣະສົງເຮັດທັກຂິນາໃຫ້ມົດຈົດໄດ້" ແມ່ນບໍ?

ປຣ. ແມ່ນ

ສກ. ອະຣິຍະບຸກຄົນ ໔ ຄູ່ ຄື ໘ ບຸກຄົນ ພຣະຜູ້ມີພຣະພາກເຈົ້າຕັດວ່າ ເປັນຜູ້ຄວນແກ່ທັກຂິນາບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກອະຣິຍະບຸກຄົນ ໔ ຄູ່ ຄື ໘ ບຸກຄົນ ພຣະຜູ້ມີພຣະພາກເຈົ້າຕັດວ່າ ເປັນຜູ້ຄວນແກ່ທັກຂິນາ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ພຣະສົງເຮັດທັກຂິນາໃຫ້ມົດຈົດໄດ້"

ສກ. ທ່ານບໍ່ຍອມຮັບວ່າ "ພຣະສົງເຮັດທັກຂິນາໃຫ້ມົດຈົດໄດ້" ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນບາງພວກທີ່ຖວາຍທານ ແດ່ພຣະສົງແລ້ວໃຫ້ທັກຂິນາບໍລິບູນມີຢູ່ ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນບາງພວກທີ່ຖວາຍທານ ແດ່ພຣະສົງແລ້ວໃຫ້ທັກຂິນາບໍລິບູນມີຢູ່ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ພຣະສົງເຮັດທັກຂິນາໃຫ້ມົດຈົດໄດ້"

ສກ. ບຸກຄົນບາງພວກທີ່ຖວາຍຈີວອນ ຯລຯ ບິນທະບາດ ຯລຯ ເສນາສະນະ ຯລຯ ຄິລານະປັດໄຈເພສັດບໍຣິຂານ ຯລຯ ຂອງຫຍໍ້າ ຯລຯ ຂອງບໍຣິໂພກ ຯລຯ ນໍ້າດື່ມ ແດ່ພຣະສົງແລ້ວໃຫ້ທັກຂິນາບໍລິບູນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນບາງພວກທີ່ຖວາຍນໍ້າດື່ມ ແດ່ພຣະສົງແລ້ວໃຫ້ທັກຂິນາບໍລິບູນມີຢູ່ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ພຣະສົງເຮັດທັກຂິນາໃຫ້ມົດຈົດໄດ້"

[໗໙໔] ປຣ. ພຣະສົງເຮັດທັກຂິນາໃຫ້ມົດຈົດໄດ້ແມ່ນບໍ?

ສກ. ແມ່ນ

ປຣ. ມັກເຮັດທັກຂິນາໃຫ້ມົດຈົດໄດ້ ຜີນກໍເຮັດທັກຂິນາໃຫ້ມົດຈົດໄດ້ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

**ນະວັດຕັບພັງສັງໂຄທັກຂິນັງວິໂສເທຕີຕິກະຖາ ຈົບ**

# ໗. ນະວັດຕັບພັງສັງໂຄພຸນຊະຕິຕິກະຖາ (໑ກຸລ)

## ວ່າດ້ວຍບໍ່ຄວນຍອມຮັບວ່າພຣະສົງສັນໄດ້

[ກຸລ໘] ສກ. ທ່ານບໍ່ຍອມຮັບວ່າ "ພຣະສົງສັນ ດື່ມ ຫຍໍ້າ ຊີມໄດ້" ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນບາງພວກທີເຮັດສັງຄະພັດ ອຸດເທສະພັດ ຍາຄູ ແລະນໍ້າປານະມີຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນບາງພວກທີເຮັດສັງຄະພັດ ອຸດເທສະພັດ ຍາຄູ ແລະນໍ້າປານະມີຢູ່ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ພຣະສົງສັນ ດື່ມ ຫຍໍ້າ ຊີມໄດ້"

ສກ. ທ່ານບໍ່ຍອມຮັບວ່າ "ພຣະສົງສັນ ດື່ມ ຫຍໍ້າ ຊີມໄດ້" ແມ່ນບໍ?

ປຣ. ແມ່ນ

ສກ. ຄະນະໂພຊະນະ ປະຣໍາປະຣະໂພຊະນະ ອະຕິຣິດຕະຊະນະ ອະນະຕິຣິດຕະ ຊະນະ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຄະນະໂພຊະນະ ປະຣໍາປະຣະໂພຊະນະ ອະຕິຣິດຕະໂພຊະນະ ອະນະຕິຣິດ ຕະໂພຊະນະ ພຣະຜູ້ມີພຣະພາກເຈົ້າຕັດໄວ້ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ພຣະສົງສັນ ດື່ມ ຫຍໍ້າ ຊີມໄດ້"

ສກ. ທ່ານບໍ່ຍອມຮັບວ່າ "ພຣະສົງສັນ ດື່ມ ຫຍໍ້າ ຊີມໄດ້" ແມ່ນບໍ?

ປຣ. ແມ່ນ

ສກ. ນໍ້າປານະພຣະຜູ້ມີພຣະພາກເຈົ້າຕັດໄວ້ ໘ ຢ່າງ ຄື ນໍ້າໝາກມ່ວງ ນໍ້າໝາກຫວ້າ ນໍ້າກ້ວຍມີເມັດ ນໍ້າກ້ວຍບໍ່ມີເມັດ ນໍ້າໝາກຊາງ ນໍ້າໝາກຈັນ ນໍ້າເຫງົ້າບົວ ນໍ້າໝາກຜາງ ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກນໍ້າປານະພຣະຜູ້ມີພຣະພາກເຈົ້າຕັດໄວ້ ໘ ຢ່າງ ຄື ນໍ້າໝາກມ່ວງ ນໍ້າໝາກຫວ້າ ນໍ້າກ້ວຍມີເມັດ ນໍ້າກ້ວຍບໍ່ມີເມັດ ນໍ້າໝາກຊາງ ນໍ້າໝາກຈັນ ນໍ້າເຫງົ້າບົວ ນໍ້າໝາກຜາງ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ພຣະສົງສັນ ດື່ມ ຫຍໍ້າ ຊີມໄດ້"

[ກຸລ໙] ປຣ. ພຣະສົງສັນ ດື່ມ ຫຍໍ້າ ຊີມໄດ້ແມ່ນບໍ?

ສກ. ແມ່ນ

ປຣ. ມັກສັນ ດື່ມ ຫຍໍ້າ ຊີມໄດ້ ຜົນກໍສັນ ດື່ມ ຫຍໍ້າ ຊີມໄດ້ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

**ນະວັດຕັບພັງສັງໂຄພຸນຊະຕິຕິກະຖາ ຈົບ**

# ໙. ນະວັດຕັບພັງສັງຄັດສະທິນນັງມະຫັບຜະລັນຕິກະຖາ (໑໗໘)

## ວ່າດ້ວຍບໍ່ຄວນຍອມຮັບວ່າທານທີ່ຖວາຍແດ່ພຣະສົງມີຜົນຫຼາຍ

[໗໙໗] ສກ. ທ່ານບໍ່ຍອມຮັບວ່າ "ທານທີ່ຖວາຍແດ່ພຣະສົງມີຜົນຫຼາຍ" ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສົງເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນເນື້ອນາບຸນອັນປະເສີດຂອງໂລກບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະສົງເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຯລຯ ເປັນເນື້ອນາບຸນອັນປະເສີດຂອງໂລກ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ທານທີ່ຖວາຍແດ່ພຣະສົງມີຜົນຫຼາຍ"

ສກ. ທ່ານບໍ່ຍອມຮັບວ່າ "ທານທີ່ຖວາຍແດ່ພຣະສົງມີຜົນຫຼາຍ" ແມ່ນບໍ?

ປຣ. ແມ່ນ

ສກ. ອະຣິຍະບຸກຄົນ ໔ ຄູ່ ຄື ໘ ບຸກຄົນ ພຣະຜູ້ມີພຣະພາກເຈົ້າຕັດວ່າ ເປັນຜູ້ຄວນແກ່ທັກຂິນາບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກອະຣິຍະບຸກຄົນ ໔ ຄູ່ ຄື ໘ ບຸກຄົນ ພຣະຜູ້ມີພຣະພາກເຈົ້າຕັດວ່າ ເປັນຜູ້ຄວນແກ່ທັກຂິນາ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ທານທີ່ຖວາຍແດ່ພຣະສົງມີຜົນຫຼາຍ"

[໗໙໘] ສກ. ທ່ານບໍ່ຍອມຮັບວ່າ "ທານທີ່ຖວາຍແດ່ພຣະສົງມີຜົນຫຼາຍ" ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ໂຄຕະມີ ພຣະນາງຈົ່ງຖວາຍສົງເຖີດ ເມື່ອພຣະນາງຖວາຍສົງແລ້ວ ຈັກຊື່ວ່າເປັນຜູ້ໄດ້ບູຊາອາຕະມາພາບແລະສົງ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທານທີ່ຖວາຍແດ່ພຣະສົງຈຶ່ງມີຜົນຫຼາຍ

ສກ. ທ່ານບໍ່ຍອມຮັບວ່າ "ທານທີ່ຖວາຍແດ່ພຣະສົງມີຜົນຫຼາຍ" ແມ່ນບໍ?

ປຣ. ແມ່ນ

ສກ. ທ້າວສັກກະຈອມເທບໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

ເມື່ອມະນຸດທັງຫຼາຍຜູ້ເປັນສັດ
ປາຖະໜາບຸນ ບູຊາຢູ່ ເຮັດບຸນເຊິ່ງໃຫ້ເກີດຜົນ
ທານໃຫ້ແລ້ວໃນບ່ອນໃດມີຜົນຫຼາຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ

ໃນທ່ານຜູ້ປະຕິບັດດີ ໔ ຈຳພວກ
ທ່ານຜູ້ຕັ້ງຢູ່ໃນຜົນ ໔ ຈຳພວກ
ນັ້ນຄືພຣະສົງ ເປັນຜູ້ປະຕິບັດຕົງ
ຕັ້ງໝັ້ນຢູ່ໃນສີນ ສະມາທິ ແລະປັນຍາ
ເມື່ອມະນຸດທັງຫຼາຍຜູ້ເປັນສັດ
ປາຖະໜາບຸນ ບູຊາຢູ່ ເຮັດບຸນເຊິ່ງໃຫ້ເກີດຜົນ
ທານໃຫ້ແລ້ວໃນພຣະສົງມີຜົນຫຼາຍ
ດ້ວຍວ່າ ພຣະສົງນີ້ມີຄຸນຍິ່ງໃຫຍ່ ໄພບູນ
ຫາປະມານບໍ່ໄດ້ ເໝືອນທະເລປ່ຽມດ້ວຍນ້ຳ
ພຣະອະຣິຍະບຸກຄົນເຫຼົ່ານີ້ແລເປັນຜູ້ປະເສີດສຸດ
ເປັນສາວົກຂອງພຣະພຸດທະເຈົ້າຜູ້ມີຄວາມພຽນ
ເປັນຜູ້ໃຫ້ແສງສະຫວ່າງຄືປັນຍາແກ່ຊາວໂລກ ຍ່ອມຍົກທຳຂຶ້ນສະແດງ
ທານທີ່ບຸກຄົນຖວາຍເຈາະຈົງສົງນັ້ນ ຊື່ວ່າເປັນທານຖວາຍດີແລ້ວ
ບູຊາສັກກາຣະຢ່າງດີແລ້ວ ທັກຂິນາທີ່ຖວາຍສົງນັ້ນມີຜົນຫຼາຍ
ທັງພຣະສຳມາສຳພຸດທະເຈົ້າທັງຫຼາຍຜູ້ຊົງຮູ້ແຈ້ງໂລກກໍຊົງສັນເສີນແລ້ວ
ເຫຼົ່າຊົນມາຫວນຣະລຶກເຖິງບຸນເຊັ່ນນີ້ໄດ້ເກີດປີຕິແລະໂສມະນັດ
ກຳຈັດມົນທິນຄືຄວາມຫ່ວງແຫນພ້ອມທັງເຫດໄດ້
ທ່ອງທ່ຽວໄປໃນໂລກ ບໍ່ຖືກບັດດິດຕິຕຽນ
ຈຶ່ງເຂົ້າເຖິງແດນສະຫວັນ"

ມີຢູ່ຈິງບໍ່ແມ່ນບໍ?
ປຣ. ແມ່ນ
ສກ. ດັ່ງນັ້ນ ທານທີ່ຖວາຍແດ່ພຣະສົງຈຶ່ງມີຜົນຫຼາຍ

**ນະວັດຕັບພັງສັງຄັດສະທິນນັງມະຫັບຜະລັນຕິກະຖາ ຈົບ**

## ໑໐. ນະວັດຕັບພັງພຸດທັດສະທິນນັງມະຫັບຜະລັນຕິກະຖາ (໑໗໔)

## ວ່າດ້ວຍບໍ່ຄວນຍອມຮັບວ່າທານທີ່ຖວາຍແດ່ພຣະພຸດທະເຈົ້າມີຜົນຫຼາຍ

[໗໘໙] ສກ. ທ່ານບໍ່ຍອມຮັບວ່າ "ທານທີ່ຖວາຍແດ່ພຣະພຸດທະເຈົ້າມີຜົນຫຼາຍ" ແມ່ນບໍ?

ປຣ. ແມ່ນ

ສກ. ພຣະຜູ້ມີພຣະພາກເຈົ້າເປັນຜູ້ເລີດ ເປັນຜູ້ປະເສີດສຸດ ເປັນປະທານ ເປັນຜູ້ອຸດົມ ເປັນຜູ້ລ້ຳເລີດກວ່າເທວະດາ ແລະມະນຸດທັງຫຼາຍ ຫາຜູ້ສະເໝີບໍ່ໄດ້ ສະເໝີກັບບຸກຄົນຜູ້ຫາຜູ້ສະເໝີບໍ່ໄດ້ ບໍ່ມີໃຜປຽບທຽບ ບໍ່ມີຜູ້ເຮັດກິດປຽບທຽບ ຫາບຸກຄົນປຽບທຽບບໍ່ໄດ້ ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ເລີດ ເປັນຜູ້ປະເສີດສຸດ ເປັນປະທານ ເປັນຜູ້ອຸດົມ ເປັນຜູ້ລ້ຳເລີດກວ່າເທວະດາ ແລະມະນຸດທັງຫຼາຍ ຫາຜູ້ສະເໝີບໍ່ໄດ້ ສະເໝີກັບບຸກຄົນຜູ້ຫາຜູ້ສະເໝີບໍ່ໄດ້ ບໍ່ມີໃຜປຽບທຽບ ບໍ່ມີຜູ້ເຮັດກິດປຽບທຽບ ຫາບຸກຄົນປຽບທຽບບໍ່ໄດ້ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ “ທານທີ່ຖວາຍແດ່ພຣະພຸດທະເຈົ້າມີຜົນຫຼາຍ”

ສກ. ທ່ານບໍ່ຍອມຮັບວ່າ “ທານທີ່ຖວາຍແດ່ພຣະພຸດທະເຈົ້າມີຜົນຫຼາຍ” ແມ່ນບໍ?

ປຣ. ແມ່ນ

ສກ. ໃຜ ໆ ທີ່ສະເໝີເໝືອນພຣະພຸດທະເຈົ້າໂດຍສີນ ສະມາທິ ປັນຍາ ມີຢູ່ແມ່ນບໍ?

ປຣ. ບໍ່ມີ

ສກ. ຫາກໃຜ ໆ ຜູ້ສະເໝີເໝືອນພຣະພຸດທະເຈົ້າໂດຍສີນ ສະມາທິ ປັນຍາ ບໍ່ມີ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ “ທານທີ່ຖວາຍແດ່ພຣະພຸດທະເຈົ້າມີຜົນຫຼາຍ”

ສກ. ທ່ານບໍ່ຍອມຮັບວ່າ “ທານທີ່ຖວາຍແດ່ພຣະພຸດທະເຈົ້າມີຜົນຫຼາຍ” ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ບໍ່ວ່າໃນໂລກນີ້ຫຼືໃນໂລກອື່ນກໍຕາມ
ບໍ່ມີຜູ້ທີ່ຈະປະເສີດກວ່າ
ຫຼືຈະສະເໝີພຣະພຸດທະເຈົ້າ
ຜູ້ເຖິງຄວາມເປັນຍອດແຫ່ງອາຫຸໄນຍະບຸກຄົນ
ຂອງເຫຼົ່າຊົນຜູ້ມີຄວາມຕ້ອງການບຸນ ຜູ້ສະແຫວງຫາຜົນໄພບູນ”

ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທານທີ່ຖວາຍແດ່ ພຣະພຸດທະເຈົ້າຈຶ່ງມີຜົນຫຼາຍ

**ນະວັດຕັບພັງພຸດທັດສະທິນນັງມະຫັບຜະລັນຕິກະຖາ ຈົບ**

# ໑໑. ທັກຂິນາວິສຸດທິກະຖາ (໑ກຜ)

## ວ່າດ້ວຍທັກຂິນາບໍລິສຸດ

[໗໐໐] ສກ. ທານບໍລິສຸດຝ່າຍທາຍົກ (ຜູ້ໃຫ້) ເທົ່ານັ້ນ ແຕ່ບໍ່ບໍລິສຸດຝ່າຍປະຕິຄາຫົກ (ຜູ້ຮັບ) ແມ່ນບໍ?

ປຣ. ແມ່ນ

ສກ. ປະຕິຄາຫົກບາງພວກເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນເນື້ອນາບຸນອັນປະເສີດຂອງໂລກມີຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກປະຕິຄາຫົກບາງພວກເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນເນື້ອນາບຸນອັນປະເສີດຂອງໂລກມີຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ທານບໍລິສຸດຝ່າຍທາຍົກເທົ່ານັ້ນ ແຕ່ບໍ່ບໍລິສຸດຝ່າຍ ປະຕິຄາຫົກ"

ສກ. ທານບໍລິສຸດຝ່າຍທາຍົກເທົ່ານັ້ນ ແຕ່ບໍ່ບໍລິສຸດຝ່າຍປະຕິຄາຫົກແມ່ນບໍ?

ປຣ. ແມ່ນ

ສກ. ອະຣິຍະບຸກຄົນ ໔ ຄູ່ ຄື ໘ ບຸກຄົນ ພຣະຜູ້ມີພຣະພາກເຈົ້າຕັດວ່າ ເປັນຜູ້ຄວນແກ່ທັກຂິນາບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກອະຣິຍະບຸກຄົນ ໔ ຄູ່ ຄື ໘ ບຸກຄົນ ພຣະຜູ້ມີພຣະພາກເຈົ້າຕັດວ່າ ເປັນຜູ້ຄວນແກ່ທັກຂິນາ ທ່ານກໍບໍ່ຄວນຍອມຮັບວ່າ "ທານບໍລິສຸດຝ່າຍທາຍົກເທົ່ານັ້ນ ແຕ່ບໍ່ບໍລິສຸດຝ່າຍປະຕິຄາຫົກ"

ສກ. ທານບໍລິສຸດຝ່າຍທາຍົກເທົ່ານັ້ນ ແຕ່ບໍ່ບໍລິສຸດຝ່າຍປະຕິຄາຫົກແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນບາງພວກໃຫ້ທານແກ່ພຣະໂສດາບັນແລ້ວ ໃຫ້ທັກຂິນາບໍລິບູນມີຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນບາງພວກໃຫ້ທານແກ່ພຣະໂສດາບັນແລ້ວ ໃຫ້ທັກຂິນາບໍລິບູນມີຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ທານບໍລິສຸດຝ່າຍທາຍົກເທົ່ານັ້ນ ແຕ່ບໍ່ບໍລິສຸດຝ່າຍປະຕິຄາຫົກ"

ສກ. ບຸກຄົນບາງພວກທານແດ່ພຣະສະກະທາຄາມີ ຯລຯ ພຣະອະນາຄາມີ ຯລຯ ພຣະອະຣະຫັນແລ້ວໃຫ້ທັກຂິນາບໍລິບູນມີຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນບາງພວກໃຫ້ທານແດ່ ພຣະອະຣະຫັນແລ້ວໃຫ້ທັກຂິນາບໍລິບູນມີຢູ່ ທ່ານກໍບໍ່ຄວນຍອມຮັບວ່າ “ທານບໍລິສຸດຝ່າຍທາຍົກເທົ່ານັ້ນ ແຕ່ບໍ່ບໍລິສຸດຝ່າຍປະຕິຄາຫົກ”

[໗໐໑] ປຣ. ທານບໍລິສຸດຝ່າຍປະຕິຄາຫົກເທົ່ານັ້ນ ຍ້ອນເຫດນັ້ນ ຈຶ່ງບໍ່ບໍລິສຸດຝ່າຍທາຍົກແມ່ນບໍ?

ສກ. ແມ່ນ

ປຣ. ບຸກຄົນອື່ນເຮັດໃຫ້ແກ່ຄົນໜຶ່ງ ສຸກທຸກມີຜູ້ອື່ນເປັນຕົວການ ບຸກຄົນຄົນລະຄົນກັນທັງເຮັດແລະສະເຫວີຍຜົນແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ທານບໍລິສຸດຝ່າຍທາຍົກເທົ່ານັ້ນ ແຕ່ບໍ່ບໍລິສຸດຝ່າຍປະຕິຄາຫົກແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ “ອານົນ ຄວາມບໍລິສຸດແຫ່ງທັກຂິນາ ໔ ປະການນີ້

ຄວາມບໍລິສຸດແຫ່ງທັກຂິນາ ໔ ປະການ ອັນໃດແດ່ ຄື

໑. ທັກຂິນາທີ່ບໍລິສຸດຝ່າຍທາຍົກ ແຕ່ບໍ່ບໍລິສຸດຝ່າຍປະຕິຄາຫົກ
໒. ທັກຂິນາທີ່ບໍລິສຸດຝ່າຍປະຕິຄາຫົກ ແຕ່ບໍ່ບໍລິສຸດຝ່າຍທາຍົກ
໓. ທັກຂິນາທີ່ບໍ່ບໍລິສຸດທັງຝ່າຍທາຍົກແລະຝ່າຍປະຕິຄາຫົກ
໔. ທັກຂິນາທີ່ບໍລິສຸດທັງຝ່າຍທາຍົກ ແລະຝ່າຍປະຕິຄາຫົກ

ທັກຂິນາທີ່ບໍລິສຸດຝ່າຍທາຍົກ ແຕ່ບໍ່ບໍລິສຸດຝ່າຍປະຕິຄາຫົກ ເປັນແນວໃດ?

ຄື ທາຍົກໃນໂລກນີ້ເປັນຜູ້ມີສີນ ມີກັນລະຍານະທຳ ແຕ່ປະຕິຄາຫົກເປັນຜູ້ທຸສີນ ມີທຳຊົ່ວຊາມ ທັກຂິນາທີ່ບໍລິສຸດຝ່າຍທາຍົກ ແຕ່ບໍ່ບໍລິສຸດຝ່າຍປະຕິຄາຫົກ ເປັນແນວນີ້ທັກຂິນາທີ່ບໍລິສຸດຝ່າຍປະຕິຄາຫົກ ແຕ່ບໍ່ບໍລິສຸດຝ່າຍທາຍົກ ເປັນແນວໃດ?

ຄື ທາຍົກໃນໂລກນີ້ເປັນຜູ້ທຸສີນ ມີທຳຊົ່ວຊາມ ແຕ່ປະຕິຄາຫົກເປັນຜູ້ມີສີນ ມີກັນລະຍານະທຳ ທັກຂິນາທີ່ບໍລິສຸດຝ່າຍປະຕິຄາຫົກ ແຕ່ບໍ່ບໍລິສຸດຝ່າຍທາຍົກ ເປັນແນວນີ້ ທັກຂິນາທີ່ບໍ່ບໍລິສຸດທັງຝ່າຍທາຍົກແລະຝ່າຍປະຕິຄາຫົກ ເປັນແນວໃດ?

ຄື ທາຍົກໃນໂລກນີ້ເປັນຜູ້ທຸສີນ ມີທຳຊົ່ວຊາມ ແລະປະຕິຄາຫົກກໍເປັນຜູ້ທຸສີນ ມີທຳຊົ່ວຊາມ ທັກຂິນາທີ່ບໍ່ບໍລິສຸດທັງຝ່າຍທາຍົກແລະຝ່າຍປະຕິຄາຫົກ ເປັນແນວນີ້ທັກຂິນາທີ່ບໍລິສຸດທັງຝ່າຍທາຍົກແລະຝ່າຍປະຕິຄາຫົກ ເປັນແນວໃດ?

ຄື ທາຍົກໃນໂລກນີ້ເປັນຜູ້ມີສີນ ມີກັນລະຍານະທຳ ແລະປະຕິຄາຫົກກໍເປັນຜູ້ມີສີນມີກັນລະຍານະທຳ ທັກຂິນາທີ່ບໍລິສຸດທັງຝ່າຍທາຍົກແລະຝ່າຍປະຕິຄາຫົກ ເປັນແນວນີ້

ອານົນ ຄວາມບໍລິສຸດແຫ່ງທັກຂິນາ ໔ ປະການນີ້”

ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ທານບໍລິສຸດຝ່າຍທາຍົກເທົ່ານັ້ນ ແຕ່ບໍ່ບໍລິສຸດຝ່າຍປະຕິຄາຫົກ"

**ທັກຂິນາວິສຸດທິກະຖາ ຈົບ**

**ສັດຕະຣະສະມະວັກ ຈົບ**

## ລວມກະຖາທີ່ມີໃນວັກນີ້ ຄື

໑. ອັດຖິອະຣະທະໂຕປຸນຍູປັດຈະໂຍຕິກະຖາ
໒. ນັດຖິອະຣະທະໂຕອະກາລະມັດຈູຕິກະຖາ
໓. ສັບພະມິທັງກຳມະໂຕຕິກະຖາ
໔. ອິນທະຣິຍະພັດທະກະຖາ
໕. ຖະເປຕະວາອະຣິຍະມັກຄັນຕິກະຖາ
໖. ນະວັດຕັບພັງສັງໂຄທັກຂິນັງປະຕິກະຄັນທາຕິຕິກະຖາ
໗. ນະວັດຕັບພັງສັງໂຄທັກຂິນັງ
໘. ນະວັດຕັບພັງສັງໂຄພຸນຊະຕິຕິກະຖາວິໂສເທຕິຕິກະຖາ
໙. ນະວັດຕັບພັງສັງຄັດສະທິນນັງ
໑໐. ນະວັດຕັບພັງພຸດທັດສະທິນນັງມະຫັບຜະລັນຕິກະຖາຜະລັນຕິກະຖາ
໑໑. ທັກຂິນາວິສຸດທິກະຖາ

# ໑໗. ອັດຖາຣະສະມະວັກ

## ໑. ມະນຸດສະໂລກະກະຖາ (໑ກຖາ)

### ວ່າດ້ວຍມະນຸດໂລກ

[໗໐໔] ສກ. ທ່ານບໍ່ຍອມຮັບວ່າ “ພຣະຜູ້ມີພຣະພາກພຸດທະເຈົ້າຊົງດຳລົງຢູ່ໃນມະນຸດໂລກ” ແມ່ນບໍ?

ປຣ. ແມ່ນ

ສກ. ເຈດີ ອາຣາມ ວິຫານ ຄາມ ນິຄົມ ນະຄອນ ຣັດ ຊົນນະບົດທີ່ພຣະພຸດທະເຈົ້າເຄີຍປະທັບຢູ່ມີຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກເຈດີ ອາຣາມ ວິຫານ ຄາມ ນິຄົມ ຣັດ ຊົນນະບົດທີ່ພຣະພຸດທະເຈົ້າເຄີຍປະທັບຢູ່ມີຢູ່ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ “ພຣະຜູ້ມີພຣະພາກພຸດທະເຈົ້າຊົງດຳລົງຢູ່ໃນມະນຸດໂລກ”

ສກ. ທ່ານບໍ່ຍອມຮັບວ່າ “ພຣະຜູ້ມີພຣະພາກພຸດທະເຈົ້າຊົງດຳລົງຢູ່ໃນມະນຸດໂລກ” ແມ່ນບໍ?

ປຣ. ແມ່ນ

ສກ. ພຣະຜູ້ມີພຣະພາກປະສູດທີ່ປ່າລຸມພິນີ ຕັດສະຣູ້ຢູ່ຕົ້ນໂພ ປະກາດທຳມະຈັກທີ່ນະຄອນພາຣານະສີ ປົງອາຍຸສັງຂານທີ່ປາວາລະເຈດີ ປະຣິນິບພານທີ່ນະຄອນກຸສິນາຣາບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະຜູ້ມີພຣະພາກເຈົ້າປະສູດທີ່ປ່າລຸມພິນີ ຯລຯ ປະຣິນິບພານທີ່ນະຄອນກຸສິນາຣາ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ “ພຣະຜູ້ມີພຣະພາກພຸດທະເຈົ້າຊົງດຳລົງຢູ່ໃນມະນຸດໂລກ”

ສກ. ທ່ານບໍ່ຍອມຮັບວ່າ “ພຣະຜູ້ມີພຣະພາກພຸດທະເຈົ້າຊົງດຳລົງຢູ່ໃນມະນຸດໂລກ” ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ “ພິກຂຸທັງຫຼາຍ ສະໄໝໜຶ່ງ ເຮົາພັກຢູ່ຄວງໄມ້ສາລະ ໃນສຸພະຄະວັນ ເຂດນະຄອນອຸກກັດຖະ” ວ່າ “ພິກຂຸທັງຫຼາຍ ສະໄໝໜຶ່ງ ເຮົາທຳອິດຕັດສະຣູ້ພັກຢູ່ທີ່ຕົ້ນອະຊະປາລະນິໂຄດ ເຂດອຸຣຸເວລາ” ວ່າ “ພິກຂຸທັງຫຼາຍ ສະໄໝໜຶ່ງ ເຮົາພັກຢູ່ ໃນເວລຸວັນສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາຊະຄຶ” ວ່າ “ພິກຂຸທັງຫຼາຍ ສະໄໝໜຶ່ງ ເຮົາພັກຢູ່ ໃນເຊຕະວັນອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດ

ຖີ" ວ່າ "ພິກຂຸທັງຫຼາຍ ສະໄໝໜຶ່ງ ເຮົາພັກຢູ່ ໃນກູຕາຄາຣະສາລາປ່າມະຫາວັນ ເຂດນະຄອນເວສາລີ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າຈຶ່ງຊົງດຳລົງຢູ່ໃນມະນຸດໂລກ

[໗໐໓] ປຣ. ພຣະຜູ້ມີພຣະພາກພຸດທະເຈົ້າຊົງດຳລົງຢູ່ໃນມະນຸດໂລກແມ່ນບໍ?

ສກ. ແມ່ນ

ປຣ. ພຣະຜູ້ມີພຣະພາກເຈົ້າຊົງກຳເນີດໃນໂລກ ຊົງຈະເລີນໃນໂລກ ແຕ່ຊົງເປັນຜູ້ອັນໂລກບໍ່ເປີເປື້ອນ ຄອບງຳໂລກຢູ່ບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກພຣະຜູ້ມີພຣະພາກເຈົ້າຊົງກຳເນີດໃນໂລກ ຊົງຈະເລີນໃນໂລກ ແຕ່ຊົງເປັນຜູ້ອັນໂລກບໍ່ເປີເປື້ອນ ຄອບງຳໂລກຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ພຣະຜູ້ມີພຣະພາກພຸດທະເຈົ້າຊົງດຳລົງຢູ່ໃນມະນຸດໂລກ"

**ມະນຸດສະໂລກະກະຖາ ຈົບ**

## ໘. ທຳມະເທສະນາກະຖາ (໑ກ໗)

## ວ່າດ້ວຍການສະແດງທຳ

[໗໐໘] ສກ. ທ່ານບໍ່ຍອມຮັບວ່າ "ພຣະຜູ້ມີພຣະພາກພຸດທະເຈົ້າຊົງສະແດງທຳ" ແມ່ນບໍ?

ປຣ. ແມ່ນ

ສກ. ໃຜສະແດງ

ປຣ. ພຣະພຸດທະນິມິດ

ສກ. ພຣະພຸດທະນິມິດເປັນພຣະຊິນນະເຈົ້າ ເປັນພຣະສາດສະດາ ເປັນພຣະສຳມາສຳພຸດທະເຈົ້າ ເປັນພຣະສັບພັນຍູ ເປັນພຣະສັບພະທັດສາວີ ເປັນພຣະທຳມັດສາມີ ເປັນພຣະທຳມະປະຕິສະຣະນະ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ທ່ານບໍ່ຍອມຮັບວ່າ "ພຣະຜູ້ມີພຣະພາກພຸດທະເຈົ້າຊົງສະແດງທຳ" ແມ່ນບໍ?

ປຣ. ແມ່ນ

ສກ. ໃຜສະແດງ

ປຣ. ທ່ານພຣະອານົນ

ສກ. ທ່ານພຣະອານົນເປັນພຣະຊິນນະເຈົ້າ ເປັນພຣະສາດສະດາ ເປັນພຣະສຳມາສຳພຸດທະເຈົ້າ ເປັນພຣະສັບພັນຍູ ເປັນພຣະສັບພະທັດສາວີ ເປັນພຣະທຳມັດສາມີ ເປັນພຣະທຳມະປະຕິສະຣະນະ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໘໐໕] ສກ. ທ່ານບໍ່ຍອມຮັບວ່າ "ພຣະຜູ້ມີພຣະພາກພຸດທະເຈົ້າຊົງສະແດງທຳ" ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ສາຣີບຸດ ເຮົາສະແດງທຳໂດຍຫຍໍ້ກໍໄດ້ ເຮົາສະແດງທຳໂດຍພິດສະດານກໍໄດ້ ເຮົາສະແດງທຳທັງໂດຍຫຍໍ້ແລະໂດຍພິດສະດານກໍໄດ້ ແຕ່ບຸກຄົນຜູ້ຮູ້ທົ່ວເຖິງຫາໄດ້ຍາກ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າຈຶ່ງຊົງສະແດງທຳ

[໘໐໖] ສກ. ທ່ານບໍ່ຍອມຮັບວ່າ "ພຣະຜູ້ມີພຣະພາກພຸດທະເຈົ້າຊົງສະແດງທຳ" ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ເຮົາຮູ້ຍິ່ງແລ້ວຈຶ່ງສະແດງທຳ ບໍ່ຮູ້ຍິ່ງແລ້ວບໍ່ສະແດງທຳ ເຮົາສະແດງທຳມີເຫດ ບໍ່ແມ່ນສະແດງທຳບໍ່ມີເຫດ ເຮົາສະແດງທຳມີປາຕິຫານ ບໍ່ແມ່ນສະແດງທຳບໍ່ມີປາຕິຫານ ເມື່ອເຮົານັ້ນຮູ້ຍິ່ງແລ້ວຈຶ່ງສະແດງທຳ ບໍ່ຮູ້ຍິ່ງແລ້ວບໍ່ສະແດງທຳ ສະແດງທຳມີເຫດ ບໍ່ແມ່ນສະແດງທຳບໍ່ມີເຫດ ສະແດງທຳທີ່ມີປາຕິຫານ ບໍ່ແມ່ນສະແດງທຳບໍ່ມີປາຕິຫານ ທ່ານທັງຫຼາຍຄວນເຮັດຕາມຄຳສັ່ງສອນ ຄວນເຮັດຕາມຄຳພ່ຳສອນ ກໍແລ ທ່ານທັງຫຼາຍຄວນທີ່ຈະຍິນດີ ຄວນທີ່ຈະຊື່ນຊົມ ຄວນທີ່ຈະໂສມະນັດວ່າ "ພຣະຜູ້ມີພຣະພາກເຈົ້າເປັນຜູ້ຕັດສະຣູ້ດ້ວຍພະອົງເອງໂດຍຊອບ ພຣະທຳເປັນທຳອັນພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ພຣະສົງເປັນຜູ້ປະຕິບັດດີແລ້ວ" ເມື່ອພຣະຜູ້ມີພຣະພາກເຈົ້າໄດ້ຕັດໄວຍາກອນພາສິດນີ້ຢູ່ ໂລກກະທາດມີໝື່ນຈັກກະວານໄດ້ຫວັ່ນໄຫວສັ່ນສະເທືອນແລ້ວ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າຈຶ່ງຊົງສະແດງທຳ

**ທຳມະເທສະນາກະຖາ ຈົບ**

## ໓. ກະຣຸນາກະຖາ (໑໗໙)
## ວ່າດ້ວຍກະລຸນາ

[໘໐໗] ສກ. ກະລຸນາຂອງພຣະຜູ້ມີພຣະພາກພຸດທະເຈົ້າບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ເມດຕາຂອງພຣະຜູ້ມີພຣະພາກພຸດທະເຈົ້າບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກະລຸນາຂອງພຣະຜູ້ມີພຣະພາກພຸດທະເຈົ້າບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ມຸທິຕາ ຯລຯ ອຸເປກຂາຂອງພຣະຜູ້ມີພຣະພາກພຸດທະເຈົ້າບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເມດຕາຂອງພຣະຜູ້ມີພຣະພາກພຸດທະເຈົ້າມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ກະລຸນາຂອງພຣະຜູ້ມີພຣະພາກພຸດທະເຈົ້າມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ມຸທິຕາ ຯລຯ ອຸເປກຂາຂອງພຣະຜູ້ມີພຣະພາກພຸດທະເຈົ້າມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ກະລຸນາຂອງພຣະຜູ້ມີພຣະພາກພຸດທະເຈົ້າມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກະລຸນາຂອງພຣະຜູ້ມີພຣະພາກພຸດທະເຈົ້າບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ພຣະຜູ້ມີພຣະພາກເຈົ້າບໍ່ແມ່ນຜູ້ປະກອບດ້ວຍກະລຸນາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະຜູ້ມີພຣະພາກເຈົ້າຊົງປະກອບດ້ວຍກະລຸນາ ຊົງເກື້ອກູນຊາວໂລກ ຊົງອະນຸເຄາະຊາວໂລກ ຊົງປະພຶດປະໂຫຍດແກ່ຊາວໂລກບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະຜູ້ມີພຣະພາກເຈົ້າຊົງປະກອບດ້ວຍກະລຸນາ ຊົງເກື້ອກູນຊາວໂລກ ຊົງອະນຸເຄາະຊາວໂລກ ຊົງປະພຶດປະໂຫຍດແກ່ຊາວໂລກ ທ່ານກໍບໍ່ຄວນຍອມຮັບວ່າ "ກະລຸນາຂອງພຣະຜູ້ມີພຣະພາກພຸດທະເຈົ້າບໍ່ມີ" ຯລຯ

ສກ. ກະລຸນາຂອງພຣະຜູ້ມີພຣະພາກພຸດທະເຈົ້າບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ພຣະຜູ້ມີພຣະພາກເຈົ້າຊົງເຂົ້າມະຫາກະລຸນາສະມາບັດບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະຜູ້ມີພຣະພາກເຈົ້າຊົງເຂົ້າມະຫາກະລຸນາສະມາບັດ ທ່ານກໍບໍ່ຄວນຍອມຮັບວ່າ "ກະລຸນາຂອງພຣະຜູ້ມີພຣະພາກພຸດທະເຈົ້າບໍ່ມີ"

[໘໐໘] ປຣ. ກະລຸນາຂອງພຣະຜູ້ມີພຣະພາກພຸດທະເຈົ້າມີຢູ່ແມ່ນບໍ?

ສກ. ແມ່ນ

ປຣ. ພຣະຜູ້ມີພຣະພາກເຈົ້າຍັງຊົງມີຣາຄະແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ດັ່ງນັ້ນ ກະລຸນາຂອງພຣະຜູ້ມີພຣະພາກພຸດທະເຈົ້າຈຶ່ງບໍ່ມີ

**ກະຣຸນາກະຖາ ຈົບ**

## ໔. ຄັນທະຊາຕິກະຖາ (໑໗໐)

## ວ່າດ້ວຍຄັນທະຊາດ

[໗໐໙] ສກ. ພຣະບັງຄົນໜັກ ພຣະບັງຄົນເບົາ ຂອງພຣະຜູ້ມີພຣະພາກພຸດທະເຈົ້າຫອມກວ່າຄັນທະຊາດອື່ນ ໆ ແມ່ນບໍ?

ປຣ. ແມ່ນ

ສກ. ພຣະຜູ້ມີພຣະພາກເຈົ້າຊົງໃຊ້ຂອງຫອມແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະຜູ້ມີພຣະພາກເຈົ້າສະເຫວີຍເຂົ້າສຸກແລະຂະໜົມກຸມມາດບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະຜູ້ມີພຣະພາກເຈົ້າສະເຫວີຍເຂົ້າສຸກ ແລະຂະໜົມກຸມມາດ ທ່ານກໍບໍ່ຄວນຍອມຮັບວ່າ "ພຣະບັງຄົນໜັກ ພຣະບັງຄົນເບົາ ຂອງພຣະຜູ້ມີພຣະພາກພຸດທະເຈົ້າຫອມກວ່າຄັນທະຊາດອື່ນ ໆ"

ສກ. ພຣະບັງຄົນໜັກ ພຣະບັງຄົນເບົາ ຂອງພຣະຜູ້ມີພຣະພາກພຸດທະເຈົ້າຫອມກວ່າຄັນທະຊາດອື່ນ ໆ ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນບາງພວກທີ່ອາບທາ ລູບທາພຣະບັງຄົນໜັກ ພຣະບັງຄົນເບົາ ຂອງພຣະຜູ້ມີພຣະພາກພຸດທະເຈົ້າ ເກັບໄວ້ໃນຫີບ ບັນຈຸໄວ້ໃນຜະອົບ ແຜ່ຂາຍທີ່ຕະຫຼາດແລະໃຊ້ຂອງຫອມນັ້ນແທນຂອງຫອມມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

**ຄັນທະຊາຕິກະຖາ ຈົບ**

# ໔. ເອກະມັກຄະກະຖາ (໑໗໑)

## ວ່າດ້ວຍທາງສາຍດຽວ

[໗໑໐] ສກ. ພຣະຜູ້ມີພຣະພາກເຈົ້າຊົງເຮັດໃຫ້ແຈ້ງສາມັນຍະຜົນ ໔ ໄດ້ດ້ວຍອະຣິຍະມັກ ມັກດຽວແມ່ນບໍ?

ປຣ. ແມ່ນ

ສກ. ມີການປະຊຸມແຫ່ງຜັດສະ ໔ ຯລຯ ປັນຍາ ໔ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະຜູ້ມີພຣະພາກເຈົ້າຊົງເຮັດໃຫ້ແຈ້ງສາມັນຍະຜົນ ໔ ໄດ້ດ້ວຍອະຣິຍະມັກ ມັກດຽວແມ່ນບໍ?

ປຣ. ແມ່ນ

ສກ. ດ້ວຍໂສດາປັດຕິມັກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ດ້ວຍສະກະທາຄາມີມັກ ຯລຯ ອະນາຄາມີມັກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ດ້ວຍມັກໃດ

ປຣ. ດ້ວຍອະຣະຫັດຕະມັກ

ສກ. ພຣະຜູ້ມີພຣະພາກເຈົ້າຊົງລະສັກກາຍະທິດຖິ ວິຈິກິດສາ ສີລັບພະຕະປະຣາມາດໄດ້ດ້ວຍອະຣະຫັດຕະມັກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຊົງລະສັກກາຍະທິດຖິ ວິຈິກິດສາ ສີລັບພະຕະປະຣາມາດໄດ້ດ້ວຍອະຣະຫັດຕະມັກແມ່ນບໍ?

ປຣ. ແມ່ນ

ສກ. ການລະສັງໂຍດ ໓ ປະການໄດ້ ພຣະຜູ້ມີພຣະພາກເຈົ້າຕັດວ່າ ເປັນໂສດາປັດຕິຜົນບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກການລະສັງໂຍດ ໓ ປະການໄດ້ ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນໂສດາປັດຕິຜົນ ທ່ານກໍບໍ່ຄວນຍອມຮັບວ່າ "ພຣະຜູ້ມີພຣະພາກເຈົ້າລະສັກກາຍະທິດຖິ ວິຈິກິດສາ ສີລັບພະຕະປະຣາມາດໄດ້ດ້ວຍອະຣະຫັດຕະມັກ"

ສກ. ພຣະຜູ້ມີພຣະພາກເຈົ້າຊົງລະກາມຣາຄະຢ່າງຫຍາບ ພະຍາບາດຢ່າງຫຍາບໄດ້ດ້ວຍອະຣະຫັດຕະມັກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ຊົງລະການຣາຄະຢ່າງຫຍາບ ພະຍາບາດຢ່າງຫຍາບໄດ້ດ້ວຍອະຣະຫັດຕະມັກ ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມເບົາບາງແຫ່ງການຣາຄະແລະພະຍາບາດ ພຣະຜູ້ມີພຣະພາກເຈົ້າຕັດວ່າ ເປັນສະກະທາຄາມີຜົນບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຄວາມເບົາບາງແຫ່ງການຣາຄະ ແລະພະຍາບາດ ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ເປັນສະກະທາຄາມີຜົນ ທ່ານກໍບໍ່ຄວນຍອມຮັບວ່າ “ພຣະຜູ້ມີພຣະພາກເຈົ້າຊົງລະການຣາຄະ ຢ່າງຫຍາບ ພະຍາບາດຢ່າງຫຍາບໄດ້ດ້ວຍອະຣະຫັດຕະມັກ”

ສກ. ພຣະຜູ້ມີພຣະພາກເຈົ້າຊົງລະການຣາຄະຢ່າງລະອຽດ ພະຍາບາດຢ່າງລະອຽດໄດ້ ດ້ວຍອະຣະຫັດຕະມັກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ຊົງລະການຣາຄະຢ່າງລະອຽດ ພະຍາບາດຢ່າງລະອຽດໄດ້ດ້ວຍອະຣະຫັດຕະມັກ ແມ່ນບໍ?

ປຣ. ແມ່ນ

ສກ. ການລະການຣາຄະ ແລະພະຍາບາດໄດ້ເດັດຂາດ ພຣະຜູ້ມີພຣະພາກເຈົ້າຕັດວ່າ ເປັນອະນາຄາມີຜົນ ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກການລະການຣາຄະ ແລະພະຍາບາດໄດ້ເດັດຂາດ ພຣະຜູ້ມີພຣະພາກເຈົ້າຕັດ ວ່າເປັນອະນາຄາມີຜົນ ທ່ານກໍບໍ່ຄວນຍອມຮັບວ່າ “ພຣະຜູ້ມີພຣະພາກເຈົ້າຊົງລະການຣາຄະຢ່າງ ລະອຽດ ພະຍາບາດຢ່າງລະອຽດໄດ້ດ້ວຍອະຣະຫັດຕະມັກ”

[໗໑໑] ປຣ. ທ່ານບໍ່ຍອມຮັບວ່າ “ພຣະຜູ້ມີພຣະພາກເຈົ້າຊົງເຮັດໃຫ້ແຈ້ງສາມັນຍະຜົນ ໔ ໄດ້ດ້ວຍອະຣິຍະມັກມັກດຽວ” ແມ່ນບໍ?

ສກ. ແມ່ນ

ປຣ. ພຣະຜູ້ມີພຣະພາກເຈົ້າຈະເລີນໂສດາປັດຕິມັກແລ້ວແມ່ນບໍ?

ສກ. ແມ່ນ

ປຣ. ພຣະຜູ້ມີພຣະພາກເຈົ້າເປັນພຣະໂສດາບັນແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ໆລໆ

ປຣ. ພຣະຜູ້ມີພຣະພາກເຈົ້າຈະເລີນສະກະທາຄາມີມັກ ໆລໆ ອະນາຄາມີມັກແລ້ວແມ່ນບໍ?

ສກ. ແມ່ນ

ປຣ. ພຣະຜູ້ມີພຣະພາກເຈົ້າເປັນພຣະອະນາຄາມີແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ฯลฯ

[๓๑๔] ສກ. ພຣະຜູ້ມີພຣະພາກເຈົ້າຊົງເຮັດໃຫ້ແຈ້ງສາມັນຍະຜົນ ๔ ໄດ້ດ້ວຍອະຣິຍະມັກ ມັກດຽວ ແຕ່ພຣະສາວົກທັງຫຼາຍເຮັດໃຫ້ແຈ້ງສາມັນຍະຜົນ ๔ ໄດ້ດ້ວຍອະຣິຍະມັກ ๔ ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສາວົກທັງຫຼາຍເຫັນທຳທີ່ພະອົງບໍ່ຊົງເຫັນ ບັນລຸທຳທີ່ພະອົງ ບໍ່ຊົງບັນລຸ ເຮັດໃຫ້ແຈ້ງທຳທີ່ພະອົງບໍ່ຊົງເຮັດໃຫ້ແຈ້ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

**ເອກະມັກຄະກະຖາ ຈົບ**

## ๖. ຊານະສັງກັນຕິກະຖາ (๑๓๔)
## ວ່າດ້ວຍການເລື້ອນຊານ

[๓๑๕] ສກ. ໂຍຄີບຸກຄົນເລື້ອນຈາກຊານໜຶ່ງໄປສູ່ຊານໜຶ່ງໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ເລື້ອນຈາກປະຖົມຊານໄປສູ່ຕະຕິຍະຊານໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ເລື້ອນຈາກຊານໜຶ່ງໄປສູ່ຊານໜຶ່ງໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ເລື້ອນຈາກທຸຕິຍະຊານໄປສູ່ຈະຕຸດຖະຊານໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ເລື້ອນຈາກປະຖົມຊານໄປສູ່ທຸຕິຍະຊານໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມນຶກເຖິງ ฯลฯ ຄວາມຕັ້ງໃຈ ເພື່ອຄວາມເກີດຂຶ້ນແຫ່ງປະຖົມຊານກໍເພື່ອຄວາມເກີດຂຶ້ນແຫ່ງທຸຕິຍະຊານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ໂຍຄີບຸກຄົນເລື້ອນຈາກປະຖົມຊານໄປສູ່ທຸຕິຍະຊານໄດ້ ແຕ່ທ່ານບໍ່ຍອມຮັບວ່າ "ຄວາມນຶກເຖິງ ฯลฯ ຄວາມຕັ້ງໃຈ ເພື່ອຄວາມເກີດຂຶ້ນແຫ່ງປະຖົມຊານກໍເພື່ອຄວາມເກີດຂຶ້ນແຫ່ງທຸຕິຍະຊານ" ແມ່ນບໍ?

ປຣ. ແມ່ນ

ສກ. ທຸຕິຍະຊານເກີດຂຶ້ນແກ່ໂຍຄີບຸກຄົນຜູ້ບໍ່ນຶກເຖິງຢູ່ ຯລຯ ບໍ່ຕັ້ງໃຈຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ທຸຕິຍະຊານເກີດຂຶ້ນແກ່ໂຍຄີບຸກຄົນຜູ້ນຶກເຖິງຢູ່ ຯລຯ ຕັ້ງໃຈຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກທຸຕິຍະຊານເກີດຂຶ້ນແກ່ໂຍຄີບຸກຄົນຜູ້ນຶກເຖິງຢູ່ ຯລຯ ຜູ້ຕັ້ງໃຈຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ໂຍຄີບຸກຄົນເລື້ອນຈາກປະຖົມຊານໄປສູ່ທຸຕິຍະຊານໄດ້" ຯລຯ

ສກ. ໂຍຄີບຸກຄົນເລື້ອນຈາກປະຖົມຊານໄປສູ່ທຸຕິຍະຊານໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ປະຖົມຊານເກີດຂຶ້ນແກ່ໂຍຄີບຸກຄົນຜູ້ມະນະສິການກາມທັງຫຼາຍໂດຍຄວາມເປັນຂອງມີໂທດແມ່ນບໍ?

ປຣ. ແມ່ນ

ສກ. ທຸຕິຍະຊານເກີດຂຶ້ນແກ່ໂຍຄີບຸກຄົນຜູ້ມະນະສິການກາມທັງຫຼາຍໂດຍຄວາມເປັນຂອງມີໂທດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ປະຖົມຊານມີວິຕົກ ມີວິຈານແມ່ນບໍ?

ປຣ. ແມ່ນ

ສກ. ທຸຕິຍະຊານມີວິຕົກ ມີວິຈານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂຍຄີບຸກຄົນເລື້ອນຈາກປະຖົມຊານໄປສູ່ທຸຕິຍະຊານໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ປະຖົມຊານກັບທຸຕິຍະຊານເປັນແນວດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໑໔] ສກ. ໂຍຄີບຸກຄົນເລື້ອນຈາກທຸຕິຍະຊານໄປສູ່ຕະຕິຍະຊານໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມນຶກເຖິງ ຯລຯ ຄວາມຕັ້ງໃຈ ເພື່ອຄວາມເກີດຂຶ້ນແຫ່ງທຸຕິຍະຊານກໍເພື່ອຄວາມເກີດຂຶ້ນແຫ່ງຕະຕິຍະຊານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂຍຄີບຸກຄົນເລື້ອນຈາກທຸຕິຍະຊານໄປສູ່ຕະຕິຍະຊານໄດ້ ແຕ່ທ່ານບໍ່ຍອມຮັບວ່າ "ຄວາມນຶກເຖິງ ຯລຯ ຄວາມຕັ້ງໃຈ ເພື່ອຄວາມເກີດຂຶ້ນແຫ່ງທຸຕິຍະຊານກໍເພື່ອຄວາມເກີດຂຶ້ນແຫ່ງຕະຕິຍະຊານ" ແມ່ນບໍ?

ປຣ. ແມ່ນ

ສກ. ຕະຕິຍະຊານເກີດຂຶ້ນແກ່ໂຍຄີບຸກຄົນຜູ້ບໍ່ນຶກເຖິງຢູ່ ຯລຯ ບໍ່ຕັ້ງໃຈຢູ່ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຕະຕິຍະຊານເກີດຂຶ້ນແກ່ໂຍຄີບຸກຄົນຜູ້ນຶກເຖິງຢູ່ ຯລຯ ຕັ້ງໃຈຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຕະຕິຍະຊານເກີດຂຶ້ນແກ່ໂຍຄີບຸກຄົນຜູ້ນຶກເຖິງຢູ່ ຯລຯ ຕັ້ງໃຈຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ໂຍຄີບຸກຄົນເລື້ອນຈາກທຸຕິຍະຊານໄປສູ່ຕະຕິຍະຊານໄດ້"

ສກ. ໂຍຄີບຸກຄົນເລື້ອນຈາກທຸຕິຍະຊານໄປສູ່ຕະຕິຍະຊານໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທຸຕິຍະຊານເກີດຂຶ້ນແກ່ໂຍຄີບຸກຄົນຜູ້ມະນະສິການວິຕົກວິຈານໂດຍຄວາມເປັນຂອງມີໂທດແມ່ນບໍ?

ປຣ. ແມ່ນ

ສກ. ຕະຕິຍະຊານເກີດຂຶ້ນແກ່ໂຍຄີບຸກຄົນຜູ້ມະນະສິການວິຕົກວິຈານໂດຍຄວາມເປັນຂອງມີໂທດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ທຸຕິຍະຊານຍັງມີປີຕິແມ່ນບໍ?

ປຣ. ແມ່ນ

ສກ. ຕະຕິຍະຊານຍັງມີປີຕິແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂຍຄີບຸກຄົນເລື້ອນຈາກທຸຕິຍະຊານໄປສູ່ຕະຕິຍະຊານໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ທຸຕິຍະຊານກັບຕະຕິຍະຊານເປັນແນວດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໑໕] ສກ. ໂຍຄີບຸກຄົນເລື້ອນຈາກຕະຕິຍະຊານໄປສູ່ຈະຕຸດຖະຊານໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມນຶກເຖິງ ຯລຯ ຄວາມຕັ້ງໃຈ ເພື່ອຄວາມເກີດຂຶ້ນແຫ່ງຕະຕິຍະຊານກໍເພື່ອຄວາມເກີດຂຶ້ນແຫ່ງຈະຕຸດຖະຊານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂຍຄີບຸກຄົນເລື້ອນຈາກຕະຕິຍະຊານໄປສູ່ຈະຕຸດຖະຊານໄດ້ ແຕ່ທ່ານບໍ່ຍອມຮັບວ່າ "ຄວາມນຶກເຖິງ ຯລຯ ຄວາມຕັ້ງໃຈ ເພື່ອຄວາມເກີດຂຶ້ນແຫ່ງຕະຕິຍະຊານກໍເພື່ອຄວາມເກີດຂຶ້ນແຫ່ງຈະຕຸດຖະຊານ" ແມ່ນບໍ?

ປຣ. ແມ່ນ

ສກ. ຈະຕຸດຖະຊານເກີດຂຶ້ນແກ່ໂຍຄີບຸກຄົນຜູ້ບໍ່ນຶກເຖິງຢູ່ ຯລຯ ບໍ່ຕັ້ງໃຈຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຈະຕຸດຖະຊານເກີດຂຶ້ນແກ່ໂຍຄີບຸກຄົນຜູ້ນຶກເຖິງຢູ່ ຯລຯ ຕັ້ງໃຈຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຈະຕຸດຖະຊານເກີດຂຶ້ນແກ່ໂຍຄີບຸກຄົນຜູ້ນຶກເຖິງຢູ່ ຯລຯ ຕັ້ງໃຈຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ໂຍຄີບຸກຄົນເລື້ອນຈາກຕະຕິຍະຊານໄປສູ່ຈະຕຸດຖະຊານໄດ້"

ສກ. ໂຍຄີບຸກຄົນເລື້ອນຈາກຕະຕິຍະຊານໄປສູ່ຈະຕຸດຖະຊານໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຕະຕິຍະຊານເກີດຂຶ້ນແກ່ໂຍຄີບຸກຄົນຜູ້ມະນະສິການປີຕິ ໂດຍຄວາມເປັນຂອງມີໂທດແມ່ນບໍ?

ປຣ. ແມ່ນ

ສກ. ຈະຕຸດຖະຊານເກີດຂຶ້ນແກ່ໂຍຄີບຸກຄົນຜູ້ມະນະສິການປີຕິ ໂດຍຄວາມເປັນຂອງມີໂທດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຕະຕິຍະຊານປະກອບດ້ວຍສຸກແມ່ນບໍ?

ປຣ. ແມ່ນ

ສກ. ຈະຕຸດຖະຊານປະກອບດ້ວຍສຸກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂຍຄີບຸກຄົນເລື້ອນຈາກຕະຕິຍະຊານໄປສູ່ຈະຕຸດຖະຊານໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຕະຕິຍະຊານກັບຈະຕຸດຖະຊານເປັນແນວດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໑໖] ປຣ. ທ່ານບໍ່ຍອມຮັບວ່າ "ໂຍຄີບຸກຄົນເລື້ອນຈາກຊານໜຶ່ງໄປສູ່ຊານໜຶ່ງໄດ້" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ພິກຂຸໃນທຳວິໄນນີ້ສະຫງັດຈາກກາມທັງຫຼາຍ ຯລຯ ເຂົ້າຈະຕຸດຖະຊານຢູ່" ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ໂຍຄີບຸກຄົນຈຶ່ງເລື້ອນຈາກຊານໜຶ່ງໄປສູ່ຊານໜຶ່ງໄດ້

**ຊານະສັງກັນຕິກະຖາ ຈົບ**

# ໗. ຊານັນຕະຣິກະຖາ (໑໘໖)

## ວ່າດ້ວຍສະມາທິທີ່ເກີດໃນລະຫວ່າງຊານ

[໘໑໗] ສກ. ສະມາທິທີ່ເກີດໃນລະຫວ່າງຊານມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ສະມາທິທີ່ເກີດໃນລະຫວ່າງຜັດສະ ຯລຯ ສະມາທິທີ່ເກີດໃນລະຫວ່າງປັນຍາມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະມາທິທີ່ເກີດໃນລະຫວ່າງຊານມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ສະມາທິທີ່ເກີດໃນລະຫວ່າງຊານ ມີຢູ່ໃນລະຫວ່າງທຸຕິຍະຊານກັບຕະຕິຍະຊານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະມາທິທີ່ເກີດໃນລະຫວ່າງຊານມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ສະມາທິທີ່ເກີດໃນລະຫວ່າງຊານມີຢູ່ໃນລະຫວ່າງຕະຕິຍະຊານກັບຈະຕຸດຖະຊານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະມາທິທີ່ເກີດໃນລະຫວ່າງຊານບໍ່ມີໃນລະຫວ່າງທຸຕິຍະຊານກັບຕະຕິຍະຊານແມ່ນບໍ?

ປຣ. ແມ່ນ

ສກ. ຫາກສະມາທິທີ່ເກີດໃນລະຫວ່າງຊານ ບໍ່ມີໃນລະຫວ່າງທຸຕິຍະຊານກັບຕະຕິຍະຊານ ທ່ານກໍບໍ່ຄວນຍອມຮັບວ່າ “ສະມາທິທີ່ເກີດໃນລະຫວ່າງຊານມີຢູ່”

ສກ. ສະມາທິທີ່ເກີດໃນລະຫວ່າງຊານ ບໍ່ມີໃນລະຫວ່າງຕະຕິຍະຊານກັບຈະຕຸດຖະຊານແມ່ນບໍ?

ປຣ. ແມ່ນ

ສກ. ຫາກສະມາທິທີ່ເກີດໃນລະຫວ່າງຊານ ບໍ່ມີໃນລະຫວ່າງຕະຕິຍະຊານກັບຈະຕຸດຖະຊານ ທ່ານກໍບໍ່ຄວນຍອມຮັບວ່າ “ສະມາທິທີ່ເກີດໃນລະຫວ່າງຊານມີຢູ່”

[໘໑໘] ສກ. ສະມາທິທີ່ເກີດໃນລະຫວ່າງຊານມີຢູ່ໃນລະຫວ່າງປະຖົມຊານກັບທຸຕິຍະຊານແມ່ນບໍ?

ປຣ. ແມ່ນ

ສກ. ສະມາທິທີ່ເກີດໃນລະຫວ່າງຊານມີຢູ່ໃນລະຫວ່າງທຸຕິຍະຊານ ກັບຕະຕິຍະຊານ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະມາທິທີ່ເກີດໃນລະຫວ່າງຊານມີຢູ່ໃນລະຫວ່າງປະຖົມຊານ ກັບທຸຕິຍະຊານແມ່ນບໍ?

ປຣ. ແມ່ນ

ສກ. ສະມາທິທີ່ເກີດໃນລະຫວ່າງຊານມີຢູ່ໃນລະຫວ່າງຕະຕິຍະຊານ ກັບຈະຕຸດຖະຊານ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະມາທິທີ່ເກີດໃນລະຫວ່າງຊານບໍ່ມີໃນລະຫວ່າງທຸຕິຍະຊານ ກັບຕະຕິຍະຊານ ແມ່ນບໍ?

ປຣ. ແມ່ນ

ສກ. ສະມາທິທີ່ເກີດໃນລະຫວ່າງຊານບໍ່ມີໃນລະຫວ່າງປະຖົມຊານ ກັບທຸຕິຍະຊານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະມາທິທີ່ເກີດໃນລະຫວ່າງຊານບໍ່ມີໃນລະຫວ່າງຕະຕິຍະຊານ ກັບຈະຕຸດຖະຊານ ແມ່ນບໍ?

ປຣ. ແມ່ນ

ສກ. ສະມາທິທີ່ເກີດໃນລະຫວ່າງຊານບໍ່ມີໃນລະຫວ່າງປະຖົມຊານ ກັບທຸຕິຍະຊານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໑໙] ສກ. ສະມາທິທີ່ບໍ່ມີວິຕົກມີພຽງວິຈານ ຊື່ວ່າສະມາທິທີ່ເກີດໃນລະຫວ່າງຊານ ແມ່ນບໍ?

ປຣ. ແມ່ນ

ສກ. ສະມາທິທີ່ມີວິຕົກມີວິຈານ ຊື່ວ່າສະມາທິທີ່ເກີດໃນລະຫວ່າງຊານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະມາທິທີ່ບໍ່ມີວິຕົກມີພຽງວິຈານ ຊື່ວ່າສະມາທິທີ່ເກີດໃນລະຫວ່າງຊານແມ່ນບໍ?

ປຣ. ແມ່ນ

ສກ. ສະມາທິທີ່ບໍ່ມີວິຕົກບໍ່ມີວິຈານ ຊື່ວ່າສະມາທິທີ່ເກີດໃນລະຫວ່າງຊານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະມາທິທີ່ມີວິຕົກມີວິຈານ ບໍ່ຊື່ວ່າສະມາທິທີ່ເກີດໃນລະຫວ່າງຊານແມ່ນບໍ?

ປຣ. ແມ່ນ

ສກ. ສະມາທິທີ່ບໍ່ມີວິຕົກມີພຽງວິຈານ ບໍ່ຊື່ວ່າສະມາທິທີ່ເກີດໃນລະຫວ່າງຊານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະມາທິທີ່ບໍ່ມີວິຕົກບໍ່ມີວິຈານ ບໍ່ຊື່ວ່າສະມາທິທີ່ເກີດໃນລະຫວ່າງຊານແມ່ນບໍ?

ປຣ. ແມ່ນ

ສກ. ສະມາທິທີ່ບໍ່ມີວິຕົກມີພຽງວິຈານ ບໍ່ຊື່ວ່າສະມາທິທີ່ເກີດໃນລະຫວ່າງຊານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໔໐] ສກ. ສະມາທິທີ່ບໍ່ມີວິຕົກມີພຽງວິຈານ ມີຢູ່ໃນລະຫວ່າງຊານທັງ ໒ ທີ່ເກີດຂື້ນສະເພາະໜ້າແມ່ນບໍ?

ປຣ. ແມ່ນ

ສກ. ເມື່ອສະມາທິທີ່ບໍ່ມີວິຕົກມີພຽງວິຈານເປັນໄປຢູ່ ປະຖົມຊານດັບໄປ ທຸຕິຍະຊານເກີດຂື້ນສະເພາະໜ້າແມ່ນບໍ?

ປຣ. ແມ່ນ

ສກ. ຫາກເມື່ອສະມາທິທີ່ບໍ່ມີວິຕົກມີພຽງວິຈານເປັນໄປຢູ່ ປະຖົມຊານດັບໄປ ທຸຕິຍະຊານ ເກີດຂື້ນສະເພາະໜ້າ ທ່ານກໍບໍ່ຄວນຍອມຮັບວ່າ “ສະມາທິທີ່ບໍ່ມີວິຕົກມີພຽງວິຈານ ຊື່ວ່າສະມາທິທີ່ເກີດໃນລະຫວ່າງຊານມີຢູ່ໃນລະຫວ່າງຊານທັງ ໒ ທີ່ເກີດຂື້ນສະເພາະໜ້າ”

[໗໔໑] ປຣ. ສະມາທິທີ່ບໍ່ມີວິຕົກມີພຽງວິຈານ ບໍ່ຊື່ວ່າສະມາທິທີ່ເກີດໃນລະຫວ່າງຊານແມ່ນບໍ?

ສກ. ແມ່ນ

ປຣ. ສະມາທິທີ່ບໍ່ມີວິຕົກມີພຽງວິຈານ ເປັນປະຖົມຊານ ຯລຯ ທຸຕິຍະຊານ ຯລຯ ຕະຕິຍະຊານ ຯລຯ ຈະຕຸດຖະຊານແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ

ປຣ. ດັ່ງນັ້ນ ສະມາທິທີ່ບໍ່ມີວິຕົກມີພຽງວິຈານ ຈຶ່ງຊື່ວ່າສະມາທິທີ່ເກີດໃນລະຫວ່າງຊານ

[໗໔໒] ສກ. ສະມາທິທີ່ບໍ່ມີວິຕົກມີພຽງວິຈານ ຊື່ວ່າສະມາທິທີ່ເກີດໃນລະຫວ່າງຊານແມ່ນບໍ?

ປຣ. ແມ່ນ

ສກ. ສະມາທິ ພຣະຜູ້ມີພຣະພາກເຈົ້າຕັດໄວ້ ໓ ຢ່າງ ຄື (໑) ສະມາທິທີ່ມີວິຕົກມີວິຈານ (໒) ສະມາທິທີ່ບໍ່ມີວິຕົກມີພຽງວິຈານ (໓) ສະມາທິທີ່ບໍ່ມີວິຕົກບໍ່ມີວິຈານບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກສະມາທິພຣະຜູ້ມີພຣະພາກເຈົ້າຕັດໄວ້ ໓ ຢ່າງ ຄື (໑) ສະມາທິທີ່ມີວິຕົກມີວິຈານ (໒) ສະມາທິທີ່ບໍ່ມີວິຕົກມີພຽງວິຈານ (໓) ສະມາທິທີ່ບໍ່ມີວິຕົກບໍ່ມີວິຈານ ທ່ານກໍບໍ່ຄວນຍອມຮັບວ່າ “ສະມາທິບໍ່ມີວິຕົກມີພຽງວິຈານ ຊື່ວ່າສະມາທິທີ່ເກີດໃນລະຫວ່າງຊານ”

**ຊານັນຕະຣິກກະຖາ ຈົບ**

# ໗. ສະມາປັນໂນສັດທັງສຸນາຕິຕິກະຖາ (໑໗໔)

## ວ່າດ້ວຍຜູ້ເຂົ້າສະມາບັດໄດ້ຍິນສຽງ

[໗໔໓] ສກ. ຜູ້ເຂົ້າສະມາບັດໄດ້ຍິນສຽງແມ່ນບໍ?

ປຣ. ແມ່ນ

ສກ. ຜູ້ເຂົ້າສະມາບັດເຫັນຮູບທາງຕາ ຯລຯ ຟັງສຽງທາງຫູ ຯລຯ ດົມກິ່ນທາງດັງ ຯລຯ ຊີມຣົດທາງລີ້ນ ຯລຯ ຖືກຕ້ອງໂຜດຖັບພະທາງກາຍໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຜູ້ເຂົ້າສະມາບັດໄດ້ຍິນສຽງແມ່ນບໍ?

ປຣ. ແມ່ນ

ສກ. ຜູ້ເຂົ້າສະມາບັດເປັນຜູ້ພຽບພ້ອມດ້ວຍໂສຕະວິນຍານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະມາທິມີແກ່ຜູ້ພຽບພ້ອມດ້ວຍມະໂນວິນຍານບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກສະມາທິມີແກ່ຜູ້ພຽບພ້ອມດ້ວຍມະໂນວິນຍານ ທ່ານກໍບໍ່ຄວນຍອມຮັບວ່າ "ຜູ້ເຂົ້າສະມາບັດໄດ້ຍິນສຽງໄດ້"

ສກ. ສະມາທິມີແກ່ຜູ້ພຽບພ້ອມດ້ວຍມະໂນວິນຍານ ຜູ້ພຽບພ້ອມດ້ວຍໂສຕະວິນຍານໄດ້ຍິນສຽງໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຫາກສະມາທິມີແກ່ຜູ້ພຽບພ້ອມດ້ວຍມະໂນວິນຍານ ຜູ້ພຽບພ້ອມດ້ວຍໂສຕະວິນຍານ ໄດ້ຍິນສຽງໄດ້ ທ່ານກໍບໍ່ຄວນຍອມຮັບວ່າ "ຜູ້ເຂົ້າສະມາບັດໄດ້ຍິນສຽງໄດ້"

ສກ. ສະມາທິມີແກ່ຜູ້ພຽບພ້ອມດ້ວຍມະໂນວິນຍານ ຜູ້ພຽບພ້ອມດ້ວຍໂສຕະວິນຍານໄດ້ຍິນສຽງໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ມີການປະຊຸມແຫ່ງຜັດສະ ໔ ຯລຯ ຈິດ ໔ ດວງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໔໔] ປຣ. ທ່ານບໍ່ຍອມຮັບວ່າ "ຜູ້ເຂົ້າສະມາບັດໄດ້ຍິນສຽງ" ແມ່ນບໍ?

ສກ. ແມ່ນ

ປຣ. ສຽງ ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນປໍລະປັກຕໍ່ປະຖົມຊານບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກສຽງ ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນປໍລະປັກຕໍ່ປະຖົມຊານ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ “ຜູ້ເຂົ້າສະມາບັດໄດ້ຍິນສຽງ”

[໗໔໕] ສກ. ສຽງພຣະຜູ້ມີພຣະພາກເຈົ້າຕັດວ່າເປັນປໍລະປັກຕໍ່ປະຖົມຊານ ຍ້ອນເຫດນັ້ນຜູ້ເຂົ້າສະມາບັດຈຶ່ງໄດ້ຍິນສຽງໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ວິຕົກວິຈານ ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນປໍລະປັກຕໍ່ທຸຕິຍະຊານ ທຸຕິຍະຊານນັ້ນຍັງມີວິຕົກວິຈານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສຽງ ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນປໍລະປັກຕໍ່ປະຖົມຊານ ດັ່ງນັ້ນ ຜູ້ເຂົ້າສະມາບັດຈຶ່ງໄດ້ຍິນສຽງໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ປີຕິ ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນປໍລະປັກຕໍ່ຕະຕິຍະຊານ ຯລຯ ລົມອັດສາສະ ປັດສາສະ ຕັດວ່າເປັນປໍລະປັກຕໍ່ຈະຕຸດຖະຊານ ຯລຯ ຮູບສັນຍາ ຕັດວ່າເປັນປໍລະປັກຕໍ່ຜູ້ເຂົ້າອາກາສານັນຈາຍະຕະນະສະມາບັດ ຯລຯ ອາກາສານັນຈາຍະຕະນະສັນຍາ ຕັດວ່າເປັນປໍລະປັກຕໍ່ຜູ້ເຂົ້າວິນຍານັນຈາຍະຕະນະສະມາບັດ ຯລຯ ວິນຍານັນຈາຍະຕະນະສັນຍາ ຕັດວ່າເປັນປໍລະປັກຕໍ່ຜູ້ເຂົ້າອາກິນຈັນຍາຍະຕະນະສະມາບັດ ຯລຯ ອາກິນຈັນຍາຍະຕະນະສັນຍາ ຕັດວ່າເປັນປໍລະປັກຕໍ່ຜູ້ເຂົ້າເນວະສັນຍານາສັນຍາຍະຕະນະສະມາບັດ ຯລຯ ສັນຍາ ແລະເວທະນາຕັດວ່າເປັນປໍລະປັກຕໍ່ຜູ້ເຂົ້າສັນຍາເວທະຍິຕະນິໂຣທະສະມາບັດ ຜູ້ເຂົ້າສັນຍາເວທະຍິຕະນິໂຣທະສະມາບັດນັ້ນຍັງມີສັນຍາແລະເວທະນາຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

**ສະມາປັນໂນສັດທັງສຸນາຕິຕິກະຖາ ຈົບ**

## ໗. ຈັກຂຸນາຣູປັງປັດສະຕີຕິກະຖາ (໑໗໕)

### ວ່າດ້ວຍເຫັນຮູບທາງຕາ

[໗໔໖] ສກ. ບຸກຄົນເຫັນຮູບທາງຕາແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນເຫັນຮູບດ້ວຍຮູບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນເຫັນຮູບດ້ວຍຮູບແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຮັບຮູ້ຮູບດ້ວຍຮູບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຮັບຮູ້ຮູບດ້ວຍຮູບແມ່ນບໍ?

ປຣ. ແມ່ນ

ສກ. ຮູບເປັນມະໂນວິນຍານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນເຫັນຮູບທາງຕາແມ່ນບໍ?

ປຣ. ແມ່ນ

ສກ. ຕາມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຕາບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຕາບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈ ທ່ານກໍບໍ່ຄວນຍອມຮັບວ່າ "ບຸກຄົນເຫັນຮູບທາງຕາ"

ສກ. ບຸກຄົນຟັງສຽງທາງຫູ ຯລຯ ດົມກິ່ນທາງດັງ ຯລຯ ຊີມຣົດທາງລີ້ນ ຯລຯ ຖືກຕ້ອງໂຜດຖັບພະທາງກາຍແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຖືກຕ້ອງຮູບດ້ວຍຮູບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຖືກຕ້ອງຮູບດ້ວຍຮູບແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຮັບຮູ້ຮູບດ້ວຍຮູບແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຮັບຮູ້ຮູບດ້ວຍຮູບແມ່ນບໍ?

ປຣ. ແມ່ນ

ສກ. ຮູບເປັນມະໂນວິນຍານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຖືກຕ້ອງໂຜດຖັບພະທາງກາຍແມ່ນບໍ?

ປຣ. ແມ່ນ

ສກ. ກາຍມີຄວາມນຶກເຖິງ ຯລຯ ຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກາຍບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກກາຍບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈ ທ່ານກໍບໍ່ຄວນຍອມຮັບວ່າ "ບຸກຄົນຖືກຕ້ອງໂຜດຖັບພະທາງກາຍ"

[໙໔໗] ປຣ. ທ່ານບໍ່ຍອມຮັບວ່າ "ບຸກຄົນເຫັນຮູບທາງຕາ ຯລຯ ຖືກຕ້ອງໂຜດຖັບພະທາງກາຍ" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ພິກຂຸໃນທຳວິໄນນີ້ເຫັນຮູບທາງຕາ ຯລຯ ຖືກຕ້ອງໂຜດຖັບພະທາງກາຍ" ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ບຸກຄົນຈຶ່ງເຫັນຮູບທາງຕາ ຯລຯ ຖືກຕ້ອງໂຜດຖັບພະທາງກາຍ

**ຈັກຂຸນາຣູປັງປັດສະຕິຕິກະຖາ ຈົບ**

**ອັດຖານະສະມະວັກ ຈົບ**

## ລວມກະຖາທີ່ມີໃນວັກນີ້ ຄື

໑. ມະນຸດສະໂລກະກະຖາ

໒. ກະຣຸນາກະຖາ

໓. ເອກະມັກຄະກະຖາ

໗. ຊານັນຕະຣິກກະຖາ

໕. ຈັກຂຸນາຣູປັງປັດສະຕິຕິກະຖາ

໔. ທຳມະເທສະນາກະຖາ

໔. ຄັນທະຊາຕິກະຖາ

໖. ຊານະສັງກັນຕິກະຖາ

໙. ສະມາປັນໂນສັດທັງສຸນາຕິຕິກະຖາ

# ໑໙. ເອກູນະວິສະຕິວັກ

## ໑. ກິເລສະຊະຫະນະກະຖາ (໑໗໖)

### ວ່າດ້ວຍການລະກິເລດ

[໗໔໗] ສກ. ບຸກຄົນລະກິເລດທີ່ເປັນອະດີດໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນໃຫ້ທຳທີ່ດັບແລ້ວດັບໄປ ໃຫ້ທຳທີ່ຫາຍໄປແລ້ວຫາຍໄປ ໃຫ້ທຳທີ່ສິ້ນໄປແລ້ວສິ້ນໄປ ໃຫ້ທຳທີ່ສູນໄປແລ້ວສູນໄປ ໃຫ້ທຳທີ່ດັບສູນໄປແລ້ວດັບສູນໄປໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

ສກ. ບຸກຄົນລະກິເລດທີ່ເປັນອະດີດໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ອະດີດດັບໄປແລ້ວບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກອະດີດດັບໄປແລ້ວ ທ່ານກໍບໍ່ຄວນຍອມຮັບວ່າ"ບຸກຄົນລະກິເລດທີ່ເປັນອະດີດໄດ້"

ສກ. ບຸກຄົນລະກິເລດທີ່ເປັນອະດີດໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ກິເລດທີ່ເປັນອະດີດບໍ່ມີບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກກິເລດທີ່ເປັນອະດີດບໍ່ມີ ທ່ານກໍບໍ່ຄວນຍອມຮັບວ່າ "ບຸກຄົນລະກິເລດທີ່ເປັນອະດີດໄດ້"

[໗໔໙] ສກ. ບຸກຄົນລະກິເລດທີ່ເປັນອະນາຄົດໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນໃຫ້ທຳທີ່ຍັງບໍ່ເກີດບໍ່ໃຫ້ເກີດ ໃຫ້ທຳທີ່ຍັງບໍ່ເກີດພ້ອມບໍ່ໃຫ້ເກີດພ້ອມ ໃຫ້ທຳທີ່ຍັງບໍ່ບັງເກີດບໍ່ໃຫ້ບັງເກີດ ໃຫ້ທຳທີ່ຍັງບໍ່ຜາກົດບໍ່ໃຫ້ຜາກົດໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

ສກ. ບຸກຄົນລະກິເລດທີ່ເປັນອະນາຄົດໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ກິເລດທີ່ເປັນອະນາຄົດຍັງບໍ່ເກີດບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກກິເລດທີ່ເປັນອະນາຄົດຍັງບໍ່ເກີດ ທ່ານກໍບໍ່ຄວນຍອມຮັບວ່າ “ບຸກຄົນລະກິເລດທີ່ເປັນອະນາຄົດໄດ້”

ສກ. ບຸກຄົນລະກິເລດທີ່ເປັນອະນາຄົດໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ກິເລດທີ່ເປັນອະນາຄົດບໍ່ມີບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກກິເລດທີ່ເປັນອະນາຄົດບໍ່ມີ ທ່ານກໍບໍ່ຄວນຍອມຮັບວ່າ “ບຸກຄົນລະກິເລດທີ່ເປັນອະນາຄົດໄດ້”

[໗໕໐] ສກ. ບຸກຄົນລະກິເລດທີ່ເປັນປັດຈຸບັນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ກຳໜັດລະຣາຄະ ຜູ້ຂັດເຄືອງລະໂທສະ ຜູ້ຫຼົງລະໂມຫະ ຜູ້ເສົ້າໝອງ ລະກິເລດໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນລະຣາຄະດ້ວຍຣາຄະ ລະໂທສະດ້ວຍໂທສະ ລະໂມຫະດ້ວຍໂມຫະ ລະກິເລດ ດ້ວຍກິເລດໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຣາຄະສຳປະຍຸດດ້ວຍຈິດ ມັກກໍສຳປະຍຸດດ້ວຍຈິດແມ່ນບໍ?

ປຣ. ແມ່ນ

ສກ. ມີການປະຊຸມແຫ່ງຜັດສະ ໔ ຢ່າງ ຯລຯ ຈິດ ໔ ດວງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຣາຄະເປັນອະກຸສົນ ສ່ວນມັກເປັນກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ເປັນກຸສົນແລະອະກຸສົນ ທີ່ມີໂທດແລະບໍ່ມີໂທດ ທີ່ຊົ່ວແລະປະນີດ ທີ່ເປັນຝ່າຍດຳ ເປັນຝ່າຍຂາວ ແລະເປັນຝ່າຍມີສ່ວນປຽບມາປະຊຸມກັນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ເປັນກຸສົນແລະອະກຸສົນ ທີ່ມີໂທດແລະບໍ່ມີໂທດ ທີ່ຊົ່ວແລະປະນີດ ທີ່ເປັນຝ່າຍດຳ ເປັນຝ່າຍຂາວ ແລະເປັນຝ່າຍມີສ່ວນປຽບມາປະຊຸມກັນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ “ພິກຂຸທັງຫຼາຍ ສິ່ງທີ່ຢູ່ຫ່າງໄກກັນຫຼາຍແທ້ ໔ ຢ່າງນີ້ ສິ່ງທີ່ຢູ່ຫ່າງໄກກັນຫຼາຍແທ້ ໔ ຢ່າງ ອັນໃດແດ່ ຄື

໑. ທ້ອງຟ້າກັບແຜ່ນດິນ ນີ້ເປັນສິ່ງທີ່ຢູ່ຫ່າງໄກກັນຫຼາຍແທ້ຢ່າງທີ ໑

ຯລຯ

ຍ້ອນແນວນັ້ນ ທຳຂອງສັດຕະບຸຣຸດຈຶ່ງຫ່າງໄກກັນກັບທຳຂອງອະສັດຕະບຸຣຸດ”

ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ “ສະພາວະທຳທີ່ເປັນກຸສົນແລະອະກຸສົນ ຯລຯ ມາປະຊຸມກັນໄດ້”

[໙໕໑] ປຣ. ທ່ານບໍ່ຍອມຮັບວ່າ “ບຸກຄົນລະກິເລດທີ່ເປັນອະດີດ ກິເລດທີ່ເປັນອະນາຄົດ ກິເລດທີ່ເປັນປັດຈຸບັນໄດ້” ແມ່ນບໍ?

ສກ. ແມ່ນ

ປຣ. ບຸກຄົນທີລະກິເລດໄດ້ບໍ່ມີແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ດັ່ງນັ້ນ ບຸກຄົນຈຶ່ງລະກິເລດທີ່ເປັນອະດີດ ກິເລດທີ່ເປັນອະນາຄົດ ກິເລດທີ່ເປັນປັດຈຸບັນໄດ້

**ກິເລສະຊະຫະນະກະຖາ ຈົບ**

# ໘. ສູນຍະຕາກະຖາ (໑໙໗)

## ວ່າດ້ວຍຄວາມວ່າງ

[໙໕໘] ສກ. ຄວາມວ່າງນັບເນື່ອງໃນສັງຂານຂັນແມ່ນບໍ?

ປຣ. ແມ່ນ

ສກ. ນິບພານທີ່ບໍ່ມີນິມິດກໍນັບເນື່ອງໃນສັງຂານຂັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມວ່າງນັບເນື່ອງໃນສັງຂານຂັນແມ່ນບໍ?

ປຣ. ແມ່ນ

ສກ. ນິບພານທີ່ບໍ່ມີບ່ອນຕັ້ງ ນັບເນື່ອງໃນສັງຂານຂັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ນິບພານທີ່ບໍ່ມີນິມິດ ທ່ານບໍ່ຍອມຮັບວ່າ “ນັບເນື່ອງໃນສັງຂານຂັນ” ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມວ່າງ ທ່ານບໍ່ຍອມຮັບວ່າ "ນັບເນື່ອງໃນສັງຂານຂັນ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ນິບພານທີ່ບໍ່ມີບ່ອນຕັ້ງ ທ່ານບໍ່ຍອມຮັບວ່າ "ນັບເນື່ອງໃນສັງຂານຂັນ" ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມວ່າງ ທ່ານບໍ່ຍອມຮັບວ່າ "ນັບເນື່ອງໃນສັງຂານຂັນ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຄວາມວ່າງ ນັບເນື່ອງໃນສັງຂານຂັນແມ່ນບໍ?

ປຣ. ແມ່ນ

ສກ. ສັງຂານຂັນບໍ່ແມ່ນບໍ່ທ່ຽງ ບໍ່ແມ່ນມີປັດໃຈປຸງແຕ່ງ ບໍ່ແມ່ນອາໄສກັນແລະກັນເກີດຂຶ້ນ ບໍ່ແມ່ນມີຄວາມສິ້ນໄປ ເສື່ອມໄປ ຄາຍອອກ ດັບໄປ ແປຜັນໄປເປັນທຳມະດາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ສັງຂານຂັນບໍ່ທ່ຽງ ມີປັດໃຈປຸງແຕ່ງ ອາໄສກັນແລະກັນເກີດຂຶ້ນ ມີຄວາມສິ້ນໄປ ເສື່ອມໄປ ຄາຍອອກ ດັບໄປ ແປຜັນໄປເປັນທຳມະດາບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກສັງຂານຂັນບໍ່ທ່ຽງ ฯລฯ ມີຄວາມແປຜັນໄປເປັນທຳມະດາ ທ່ານກໍບໍ່ຄວນຍອມຮັບວ່າ "ຄວາມວ່າງນັບເນື່ອງໃນສັງຂານຂັນ"

[໕໖໓] ສກ. ຄວາມວ່າງແຫ່ງຮູບຂັນນັບເນື່ອງໃນສັງຂານຂັນແມ່ນບໍ?

ປຣ. ແມ່ນ

ສກ. ຄວາມວ່າງແຫ່ງສັງຂານຂັນນັບເນື່ອງໃນຮູບຂັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຄວາມວ່າງແຫ່ງເວທະນາຂັນ ฯລฯ ສັນຍາຂັນ ฯລฯ ວິນຍານຂັນນັບເນື່ອງໃນສັງຂານຂັນແມ່ນບໍ?

ປຣ. ແມ່ນ

ສກ. ຄວາມວ່າງແຫ່ງສັງຂານຂັນນັບເນື່ອງໃນວິນຍານຂັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຄວາມວ່າງແຫ່ງສັງຂານຂັນ ທ່ານບໍ່ຍອມຮັບວ່າ "ນັບເນື່ອງໃນຮູບຂັນ" ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມວ່າງແຫ່ງຮູບຂັນ ທ່ານບໍ່ຍອມຮັບວ່າ "ນັບເນື່ອງໃນສັງຂານຂັນ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຄວາມວ່າງແຫ່ງສັງຂານຂັນ ທ່ານບໍ່ຍອມຮັບວ່າ "ນັບເນື່ອງໃນເວທະນາຂັນ ฯລฯ ນັບເນື່ອງໃນສັນຍາຂັນ ฯລฯ ນັບເນື່ອງໃນວິນຍານຂັນ" ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມວ່າງແຫ່ງວິນຍານຂັນ ທ່ານບໍ່ຍອມຮັບວ່າ "ນັບເນື່ອງໃນສັງຂານຂັນ" ແມ່ນບໍ?

ປຣ. ບໍ່ຄວນກ່າວແບວນັ້ນ ຯລຯ

[໘໓໔] ປຣ. ທ່ານບໍ່ຍອມຮັບວ່າ "ຄວາມວ່າງນັບເນື່ອງໃນສັງຂານຂັນ" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ສັງຂານນີ້ວ່າງຈາກອັດຕາຫຼືຈາກສິ່ງທີ່ນັບເນື່ອງດ້ວຍອັດຕາ" ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ຄວາມວ່າງຈຶ່ງນັບເນື່ອງໃນສັງຂານຂັນ

**ສູນຍະຕາກະຖາ ຈົບ**

## ໖. ສາມັນຍະຜະລະກະຖາ (໑໘໘)

## ວ່າດ້ວຍຜົນແຫ່ງຄວາມເປັນສະມະນະ

[໘໓໕] ສກ. ຜົນແຫ່ງຄວາມເປັນສະມະນະ ເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ (ເປັນອະສັງຂະຕະ) ແມ່ນບໍ?

ປຣ. ແມ່ນ

ສກ. ຜົນແຫ່ງຄວາມເປັນສະມະນະ ເປັນນິບພານ ເປັນບ່ອນຕ້ານທານ ເປັນບ່ອນເຊື່ອງ ເປັນບ່ອນເພິ່ງ ເປັນບ່ອນໝາຍ ເປັນບ່ອນໝັ້ນ ເປັນອຳມະຕະແມ່ນບໍ?

ປຣ. ບໍ່ຄວນກ່າວແບວນັ້ນ ຯລຯ

ສກ. ຜົນແຫ່ງຄວາມເປັນສະມະນະເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ນິບພານເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງມີ ໔ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແບວນັ້ນ ຯລຯ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງມີ ໔ ຢ່າງແມ່ນບໍ?

ປຣ. ແມ່ນ

ສກ. ບ່ອນຕ້ານທານມີ ໔ ຢ່າງ ຯລຯ ຊ່ອງວ່າງແຫ່ງນິບພານມີ ໔ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແບວນັ້ນ ຯລຯ

[໘໓໖] ສກ. ຜົນແຫ່ງຄວາມເປັນສະມະນະເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ຄວາມເປັນສະມະນະເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມເປັນສະມະນະເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ຜົນແຫ່ງຄວາມເປັນສະມະນະເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂສດາປັດຕິຜົນເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ໂສດາປັດຕິມັກເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂສດາປັດຕິມັກເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ໂສດາປັດຕິຜົນເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະກະທາຄາມິຜົນ ຯລຯ ອະນາຄາມິຜົນ ຯລຯ ອະຣະຫັດຕະຜົນເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ອະຣະຫັດຕະມັກເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະຣະຫັດຕະມັກເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ອະຣະຫັດຕະຜົນເປັນສະພາວະທຳທີ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂສດາປັດຕິຜົນເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ສະກະທາຄາມິຜົນ ຯລຯ ອະນາຄາມິຜົນ ຯລຯ ອະຣະຫັດຕະຜົນເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ນິບພານກໍເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງມີ ໕ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງມີ ໕ ຢ່າງແມ່ນບໍ?

ປຣ. ແມ່ນ

ສກ. ບ່ອນຕ້ານທານມີ ໕ ຢ່າງ ฯລฯ ຊ່ອງວ່າງແຫ່ງນິບພານມີ ໕ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

**ສາມັນຍະຜະລະກະຖາ ຈົບ**

# ໘. ປັດຕິກະຖາ (໑໙໙)

## ວ່າດ້ວຍການໄດ້

[໙໑໗] ສກ. ການໄດ້ ເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ (ເປັນອະສັງຂະຕະ)ແມ່ນບໍ?

ປຣ. ແມ່ນ

ສກ. ການໄດ້ເປັນນິບພານ ເປັນບ່ອນຕ້ານທານ ເປັນບ່ອນເຊື່ອງ ເປັນບ່ອນຣະລຶກ ເປັນບ່ອນໝາຍ ເປັນບ່ອນໝັ້ນ ເປັນອຳມະຕະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ການໄດ້ເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ນິບພານກໍເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງມີ ໒ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງມີ ໒ ຢ່າງແມ່ນບໍ?

ປຣ. ແມ່ນ

ສກ. ບ່ອນຕ້ານທານມີ ໒ ຢ່າງ ฯລฯ ຊ່ອງວ່າງແຫ່ງນິບພານມີ ໒ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

[໙໑໙] ສກ. ການໄດ້ຈີວອນເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ການໄດ້ເປັນນິບພານ ฯລฯ ເປັນອຳມະຕະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ການໄດ້ຈີວອນເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ນິບພານກໍເປັນສະພາວະທຳ ທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງມີ ໒ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງມີ ໔ ຢ່າງແມ່ນບໍ?

ປຣ. ແມ່ນ

ສກ. ບ່ອນຕ້ານທານມີ ໔ ຢ່າງ ຯລຯ ຊ່ອງວ່າງແຫ່ງນິບພານມີ ໔ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການໄດ້ບິນທະບາດ ຯລຯ ການໄດ້ເສນາສະນະ ຯລຯ ການໄດ້ຄິລານະປັດໄຈເພສັດບໍຣິຂານເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ການໄດ້ເປັນນິບພານ ຯລຯ ເປັນບ່ອນໝັ້ນ ເປັນອຳມະຕະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການໄດ້ຄິລານະປັດໄຈເພສັດບໍຣິຂານ ເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງນິບພານກໍເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງມີ ໔ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງມີ ໔ ຢ່າງແມ່ນບໍ?

ປຣ. ແມ່ນ

ສກ. ບ່ອນຕ້ານທານມີ ໔ ຢ່າງ ຯລຯ ຊ່ອງວ່າງແຫ່ງນິບພານມີ ໔ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການໄດ້ຈີວອນເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ຯລຯ ການໄດ້ບິນທະບາດ ຯລຯ ການໄດ້ເສນາສະນະ ຯລຯ ການໄດ້ຄິລານະປັດໄຈເພສັດບໍຣິຂານເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ນິບພານກໍເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງມີ ໕ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງມີ ໕ ຢ່າງແມ່ນບໍ?

ປຣ. ແມ່ນ

ສກ. ບ່ອນຕ້ານທານມີ ໕ ຢ່າງ ຯລຯ ຊ່ອງວ່າງແຫ່ງນິບພານມີ ໕ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໘໖໙] ສກ. ການໄດ້ປະຖົມຊານເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ຯລຯ (ຄວນໃຫ້ພິດສະດານທັງໝົດໂດຍໄນທີ່ກ່າວມາແລ້ວ) ການໄດ້ທຸຕິຍະຊານ ຯລຯ ຕະຕິຍະຊານ ຯລຯ

ຈະຕຸດຖະຊານ ຯລຯ ອາກາສານັນຈາຍະຕະນະ ຯລຯ ວິນຍານັນຈາຍະຕະນະ ຯລຯ ອາກິນຈັນຍາຍະຕະນະ ຯລຯ ເນວະສັນຍານາສັນຍາຍະຕະນະ ຯລຯ ໂສດາປັດຕິມັກ ຯລຯ ໂສດາປັດຕິຜົນ ຯລຯ ສະກະທາຄາມິມັກ ຯລຯ ສະກະທາຄາມິຜົນ ຯລຯ ອະນາຄາມິມັກ ຯລຯ ອະນາຄາມິຜົນ ຯລຯ ອະຣະຫັດຕະມັກ ຯລຯ ການໄດ້ອະຣະຫັດຕະຜົນເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ການໄດ້ເປັນນິບພານ ຯລຯ ເປັນບ່ອນໝັ້ນ ເປັນອຳມະຕະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການໄດ້ອະຣະຫັດຕະຜົນເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ນິບພານກໍເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງມີ ໒ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງມີ ໒ ຢ່າງແມ່ນບໍ?

ປຣ. ແມ່ນ

ສກ. ບ່ອນຕ້ານທານມີ ໒ ຢ່າງ ຯລຯ ຊ່ອງວ່າງແຫ່ງນິບພານມີ ໒ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການໄດ້ໂສດາປັດຕິມັກເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ການໄດ້ໂສດາປັດຕິຜົນເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ຯລຯ ການໄດ້ອະຣະຫັດຕະມັກເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ການໄດ້ອະຣະຫັດຕະຜົນເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ນິບພານກໍເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງມີ ໙ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງມີ ໙ ຢ່າງແມ່ນບໍ?

ປຣ. ແມ່ນ

ສກ. ບ່ອນຕ້ານທານມີ ໙ ຢ່າງ ຯລຯ ຊ່ອງວ່າງແຫ່ງນິບພານມີ ໙ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໔໐] ປຣ. ທ່ານບໍ່ຍອມຮັບວ່າ "ການໄດ້ເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ" ແມ່ນບໍ?

ສກ. ແມ່ນ

ປຣ. ການໄດ້ເປັນຮູບ ເປັນເວທະນາ ເປັນສັນຍາ ເປັນສັງຂານ ເປັນວິນຍານແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ດັ່ງນັ້ນ ການໄດ້ຈຶ່ງເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ

**ປັດຕິກະຖາ ຈົບ**

## ៥. ຕະຖະຕາກະຖາ (໑໗໐)
## ວ່າດ້ວຍຄວາມເປັນຈິງ

[໗໔໑] ສກ. ຄວາມເປັນຈິງແຫ່ງສະພາວະທຳທັງປວງເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ (ເປັນອະສັງຂະຕະ) ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມເປັນຈິງແຫ່ງສະພາວະທຳທັງປວງເປັນນິບພານ ຯລຯ ເປັນອຳມະຕະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມເປັນຈິງແຫ່ງສະພາວະທຳທັງປວງ ເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ນິບພານກໍເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງມີ ໒ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງມີ ໒ ຢ່າງແມ່ນບໍ?

ປຣ. ແມ່ນ

ສກ. ບ່ອນຕ້ານທານມີ ໒ ຢ່າງ ຯລຯ ຊ່ອງວ່າງແຫ່ງນິບພານມີ ໒ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໔໒] ສກ. ຄວາມເປັນຮູບແຫ່ງຮູບ ຄວາມເປັນຮູບເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມເປັນຮູບແຫ່ງຮູບນັ້ນເປັນນິບພານ ຯລຯ ເປັນອຳມະຕະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມເປັນຮູບແຫ່ງຮູບ ຄວາມເປັນຮູບເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ນິບພານກໍເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງມີ ໒ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງມີ ໔ ຢ່າງແມ່ນບໍ?

ປຣ. ແມ່ນ

ສກ. ບ່ອນຕ້ານທານມີ ໔ ຢ່າງ ຯລຯ ຊ່ອງວ່າງແຫ່ງນິບພານມີ ໔ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມເປັນເວທະນາແຫ່ງເວທະນາ ຄວາມເປັນເວທະນາ ຯລຯ ຄວາມເປັນສັນຍາແຫ່ງສັນຍາ ຄວາມເປັນສັນຍາ ຯລຯ ຄວາມເປັນສັງຂານແຫ່ງສັງຂານ ຄວາມເປັນສັງຂານ ຯລຯ ຄວາມເປັນວິນຍານແຫ່ງວິນຍານ ຄວາມເປັນວິນຍານເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຄວາມເປັນວິນຍານແຫ່ງນິບພານ ຯລຯ ເປັນອຳມະຕະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄວາມເປັນຮູບແຫ່ງຮູບ ຄວາມເປັນຮູບເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ຯລຯ ຄວາມເປັນວິນຍານແຫ່ງວິນຍານ ຄວາມເປັນວິນຍານເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ນິບພານກໍເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງມີ ໖ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງມີ ໖ ຢ່າງແມ່ນບໍ?

ປຣ. ແມ່ນ

ສກ. ບ່ອນຕ້ານທານມີ ໖ ຢ່າງ ຯລຯ ຊ່ອງວ່າງແຫ່ງນິບພານມີ ໖ ຢ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໘໔໓] ປຣ. ທ່ານບໍ່ຍອມຮັບວ່າ "ຄວາມເປັນຈິງແຫ່ງສະພາວະທຳທັງປວງເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ" ແມ່ນບໍ?

ສກ. ແມ່ນ

ປຣ. ຄວາມເປັນຈິງແຫ່ງສະພາວະທຳທັງປວງເປັນຮູບ ເວທະນາ ສັນຍາ ສັງຂານ ວິນຍານແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ

ປຣ. ດັ່ງນັ້ນ ຄວາມເປັນຈິງແຫ່ງສະພາວະທຳທັງປວງ ຈຶ່ງເປັນສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ

**ຕະຖະຕາກະຖາ ຈົບ**

# ໖. ກຸສະລະກະຖາ (໑໗໑)
## ວ່າດ້ວຍກຸສົນ

[໗໔໔] ສກ. ນິບພານທາດເປັນກຸສົນແມ່ນບໍ?

ປຣ. ແມ່ນ

ສກ. ນິບພານທາດຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ນິບພານທາດຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ຫາກນິບພານທາດຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈ ທ່ານກໍບໍ່ຄວນຍອມຮັບວ່າ "ນິບພານທາດເປັນກຸສົນ"

[໗໔໕] ສກ. ອະໂລພະເປັນກຸສົນ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ນິບພານທາດເປັນກຸສົນ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະໂທສະເປັນກຸສົນ ຯລຯ ອະໂມຫະ ຯລຯ ສັດທາ ຯລຯ ວິຣິຍະ ຯລຯ ສະຕິ ຯລຯ ສະມາທິ ຯລຯ ປັນຍາ ເປັນກຸສົນ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ນິບພານທາດເປັນກຸສົນ ຮັບຮູ້ອາລົມໄດ້ ມີຄວາມນຶກເຖິງ ຯລຯ ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ນິບພານທາດເປັນກຸສົນ ແຕ່ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ອະໂລພະເປັນກຸສົນ ແຕ່ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ນິບພານທາດເປັນກຸສົນ ແຕ່ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ແມ່ນ

ສກ. ອະໂທສະເປັນກຸສົນ ຯລຯ ອະໂມຫະ ຯລຯ ສັດທາ ຯລຯ ວິຣິຍະ ຯລຯ ສະຕິ ຯລຯ ສະມາທິ ຯລຯ ປັນຍາ ເປັນກຸສົນ ແຕ່ຮັບຮູ້ອາລົມບໍ່ໄດ້ ບໍ່ມີຄວາມນຶກເຖິງ ຯລຯ ບໍ່ມີຄວາມຕັ້ງໃຈແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໔໖] ປຣ. ທ່ານບໍ່ຍອມຮັບວ່າ "ນິບພານທາດເປັນກຸສົນ" ແມ່ນບໍ?

ສກ. ແມ່ນ

ປຣ. ນິບພານທາດບໍ່ມີໂທດບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກນິບພານທາດບໍ່ມີໂທດ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ນິບພານທາດເປັນກຸສົນ"

**ກຸສະລະກະຖາ ຈົບ**

## ກ. ອັດຈັນຕະນິຍາມະກະຖາ (໑໗໔)
## ວ່າດ້ວຍຄວາມແນ່ນອນໂດຍສ່ວນດຽວ

[໗໔໗] ສກ. ຄວາມແນ່ນອນໂດຍສ່ວນດຽວຂອງປຸຖຸຊົນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ຂ້າມານດາເປັນຜູ້ແນ່ນອນໂດຍສ່ວນດຽວ ຜູ້ຂ້າບິດາ ຯລຯ ຜູ້ຂ້າພຣະອະຣະຫັນ ຯລຯ ຜູ້ທຳຮ້າຍພຣະພຸດທະເຈົ້າຈົນເຖິງພຣະໂລຫິດຫໍ້ ຯລຯ ຜູ້ທຳລາຍສົງໃຫ້ແຕກກັນ ເປັນຜູ້ແນ່ນອນໂດຍສ່ວນດຽວແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໔໘] ສກ. ຄວາມແນ່ນອນໂດຍສ່ວນດຽວຂອງປຸຖຸຊົນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ວິຈິກິດສາເພິ່ງເກີດຂຶ້ນແກ່ບຸກຄົນຜູ້ແນ່ນອນໂດຍສ່ວນດຽວແມ່ນບໍ?

ປຣ. ແມ່ນ

ສກ. ຫາກວິຈິກິດສາເພິ່ງເກີດຂຶ້ນແກ່ບຸກຄົນຜູ້ແນ່ນອນໂດຍສ່ວນດຽວ ທ່ານກໍບໍ່ຄວນຍອມຮັບວ່າ "ຄວາມແນ່ນອນໂດຍສ່ວນດຽວຂອງປຸຖຸຊົນມີຢູ່"

ສກ. ວິຈິກິດສາບໍ່ເພິ່ງເກີດຂຶ້ນແກ່ບຸກຄົນຜູ້ແນ່ນອນໂດຍສ່ວນດຽວແມ່ນບໍ?

ປຣ. ແມ່ນ

ສກ. ເຂົາລະວິຈິກິດສາໄດ້ແລ້ວແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ເຂົາລະວິຈິກິດສາໄດ້ແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ລະໄດ້ດ້ວຍໂສດາປັດຕິມັກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ລະໄດ້ດ້ວຍສະກະທາຄາມິມັກ ฯລฯ ອະນາຄາມິມັກ ฯລฯ ອະຣະຫັດຕະມັກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ລະໄດ້ດ້ວຍມັກໃດ

ປຣ. ລະໄດ້ດ້ວຍມັກຝ່າຍອະກຸສົນ

ສກ. ມັກຝ່າຍອະກຸສົນເປັນສະພາວະທຳນຳສັດອອກຈາກວັດຕະທຸກ ໃຫ້ເຖິງຄວາມສິ້ນໄປ ໃຫ້ເຖິງຄວາມຕັດສະຣູ້ ໃຫ້ເຖິງນິບພານ ບໍ່ເປັນອາລົມຂອງອາສະວະ ฯລฯ ບໍ່ເປັນອາລົມຂອງສັງກິເລດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ມັກຝ່າຍອະກຸສົນບໍ່ເປັນສະພາວະທຳນຳສັດອອກຈາກວັດຕະທຸກ ฯລฯ (ແຕ່ຍັງ) ເປັນອາລົມຂອງສັງກິເລດບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກມັກຝ່າຍອະກຸສົນບໍ່ເປັນສະພາວະທຳນຳສັດອອກຈາກທຸກ ฯລฯ (ແຕ່ຍັງ) ເປັນອາລົມຂອງສັງກິເລດ ທ່ານກໍບໍ່ຄວນຍອມຮັບວ່າ “ບຸກຄົນຜູ້ແນ່ນອນໂດຍສ່ວນດຽວລະວິຈິກິດສາໄດ້ດ້ວຍມັກຝ່າຍອະກຸສົນ”

[໗໘໙] ສກ. ອຸດເສທະທິດຖິ ເພິ່ງເກີດຂຶ້ນແກ່ບຸກຄົນຜູ້ແນ່ນອນໂດຍສັດສະຕະທິດຖິແມ່ນບໍ?

ປຣ. ແມ່ນ

ສກ. ຫາກອຸດເສທະທິດຖິເພິ່ງເກີດຂຶ້ນແກ່ບຸກຄົນຜູ້ແນ່ນອນໂດຍສັດສະຕະທິດຖິ ທ່ານກໍບໍ່ຄວນຍອມຮັບວ່າ “ຄວາມແນ່ນອນໂດຍສ່ວນດຽວຂອງປຸຖຸຊົນມີຢູ່”

ສກ. ອຸດເສທະທິດຖິບໍ່ເພິ່ງເກີດຂຶ້ນແກ່ບຸກຄົນຜູ້ແນ່ນອນໂດຍສັດສະຕະທິດຖິແມ່ນບໍ?

ປຣ. ແມ່ນ

ສກ. ເຂົາລະອຸດເສທະທິດຖິໄດ້ແລ້ວແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ເຂົາລະອຸດເສທະທິດຖິໄດ້ແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ລະໄດ້ດ້ວຍໂສດາປັດຕິມັກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ລະໄດ້ດ້ວຍສະກະທາຄາມິມັກ ຯລຯ ອະນາຄາມິມັກ ຯລຯ ອະຣະຫັດຕະມັກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ລະໄດ້ດ້ວຍມັກໃດ

ປຣ. ລະໄດ້ດ້ວຍມັກຝ່າຍອະກຸສົນ

ສກ. ມັກຝ່າຍອະກຸສົນເປັນສະພາວະທຳນຳສັດອອກຈາກວັດຕະທຸກ ຯລຯ[1] ທ່ານກໍບໍ່ຄວນຍອມຮັບວ່າ "ບຸກຄົນຜູ້ແນ່ນອນໂດຍສັດສະຕະທິດຖິລະອຸດເສທະທິດຖິໄດ້ດ້ວຍມັກຝ່າຍອະກຸສົນ"

[໘໕໐] ສກ. ສັດສະຕະທິດຖິເພິ່ງເກີດຂຶ້ນແກ່ບຸກຄົນຜູ້ແນ່ນອນ ໂດຍອຸດເສທະທິດຖິແມ່ນບໍ?

ປຣ. ແມ່ນ

ສກ. ຫາກສັດສະຕະທິດຖິເພິ່ງເກີດຂຶ້ນແກ່ບຸກຄົນຜູ້ແນ່ນອນໂດຍອຸດເສທະທິດຖິ ທ່ານກໍບໍ່ຄວນຍອມຮັບວ່າ "ຄວາມແນ່ນອນໂດຍສ່ວນດຽວຂອງປຸຖຸຊົນມີຢູ່"

ສກ. ສັດສະຕະທິດຖິບໍ່ເພິ່ງເກີດຂຶ້ນແກ່ບຸກຄົນຜູ້ແນ່ນອນໂດຍອຸດເສທະທິດຖິແມ່ນບໍ?

ປຣ. ແມ່ນ

ສກ. ເຂົາລະສັດສະຕະທິດຖິໄດ້ແລ້ວແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເຂົາລະສັດສະຕະທິດຖິໄດ້ແລ້ວແມ່ນບໍ?

ປຣ. ແມ່ນ

ສກ. ລະໄດ້ດ້ວຍໂສດາປັດຕິມັກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ລະໄດ້ດ້ວຍສະກະທາຄາມິມັກ ຯລຯ ອະນາຄາມິມັກ ຯລຯ ອະຣະຫັດຕະມັກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ລະໄດ້ດ້ວຍມັກໃດ

ປຣ. ລະໄດ້ດ້ວຍມັກຝ່າຍອະກຸສົນ

ສກ. ມັກຝ່າຍອະກຸສົນເປັນສະພາວະທຳນຳສັດອອກຈາກວັດຕະທຸກ ຯລຯ ທ່ານກໍບໍ່ຄວນຍອມຮັບວ່າ "ບຸກຄົນຜູ້ແນ່ນອນໂດຍອຸດເສທະທິດຖິລະສັດສະຕະທິດຖິໄດ້ດ້ວຍມັກຝ່າຍອະກຸສົນ"

[໗໕໑] ປຣ. ທ່ານບໍ່ຍອມຮັບວ່າ "ຄວາມແນ່ນອນໂດຍສ່ວນດຽວຂອງປຸຖຸຊົນມີຢູ່" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ບຸກຄົນບາງຄົນໃນໂລກນີ້ ເປັນຜູ້ປະກອບດ້ວຍສະພາວະທຳທີ່ເປັນອະກຸສົນຝ່າຍດຳໂດຍສ່ວນດຽວ ເຂົາຈົມແລ້ວຄັ້ງດຽວກໍຍັງຈົມຢູ່ນັ້ນເອງ" ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ຄວາມແນ່ນອນໂດຍສ່ວນດຽວຂອງປຸຖຸຊົນຈຶ່ງມີຢູ່

[໗໕໘] ສກ. ຍ້ອນທ່ານເຂົ້າໃຈວ່າ "ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ບຸກຄົນບາງຄົນໃນໂລກນີ້ເປັນຜູ້ປະກອບດ້ວຍສະພາວະທຳທີ່ເປັນອະກຸສົນຝ່າຍດຳໂດຍສ່ວນດຽວ ເຂົາຈົມແລ້ວຄັ້ງດຽວກໍຍັງຈົມຢູ່ນັ້ນເອງ" ຈຶ່ງຍອມຮັບວ່າ "ຄວາມແນ່ນອນໂດຍສ່ວນດຽວຂອງປຸຖຸຊົນມີຢູ່" ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ບຸກຄົນບາງຄົນໃນໂລກນີ້ຜຸດຂຶ້ນແລ້ວຈົມລົງ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ເຂົາຜຸດຂຶ້ນແລ້ວກັບຈົມລົງທຸກຄັ້ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຍ້ອນທ່ານເຂົ້າໃຈວ່າ "ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ບຸກຄົນບາງຄົນໃນໂລກນີ້ ເປັນຜູ້ປະກອບດ້ວຍສະພາວະທຳທີ່ເປັນອະກຸສົນຝ່າຍດຳໂດຍສ່ວນດຽວ ເຂົາຈົມແລ້ວຄັ້ງດຽວກໍຍັງຈົມຢູ່ນັ້ນເອງ" ຈຶ່ງຍອມຮັບວ່າ "ຄວາມແນ່ນອນໂດຍສ່ວນດຽວຂອງປຸຖຸຊົນຈຶ່ງມີຢູ່" ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ບຸກຄົນບາງຄົນໃນໂລກນີ້ເປັນຜູ້ຜຸດຂຶ້ນແລ້ວຢຸດຢູ່ ຜຸດຂຶ້ນແລ້ວຫຼຽວແນ່ມເບິ່ງ ຜຸດຂຶ້ນແລ້ວຂ້າມໄປ ຜຸດຂຶ້ນ ແລ້ວໄດ້ບ່ອນເພິ່ງ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ເຂົາຜຸດຂຶ້ນແລ້ວກໍໄດ້ບ່ອນເພິ່ງທຸກຄັ້ງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

**ອັດຈັນຕະນິຍາມະກະຖາ ຈົບ**

# ໗. ອິນທະຣິຍະກະຖາ (໑໗໖)
## ວ່າດ້ວຍອິນຊີ

[໗໕໖] ສກ. ສັດທິນຊີທີ່ເປັນໂລກິຍະບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ສັດທາທີ່ເປັນໂລກິຍະບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ວິຣິຍິນຊີທີ່ເປັນໂລກິຍະ ฯລฯ ສະຕິນຊີ ฯລฯ ສະມາທິນຊີ ฯລฯ ປັນຍິນຊີທີ່ເປັນໂລກິຍະບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ປັນຍາທີ່ເປັນໂລກິຍະບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ສັດທາທີ່ເປັນໂລກິຍະມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ສັດທິນຊີທີ່ເປັນໂລກິຍະມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ວິຣິຍະທີ່ເປັນໂລກິຍະ ฯລฯ ສະຕິ ฯລฯ ສະມາທິ ฯລฯ ປັນຍາທີ່ເປັນໂລກິຍະມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ປັນຍິນຊີທີ່ເປັນໂລກິຍະມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ມະໂນທີ່ເປັນໂລກິຍະມີຢູ່ ມະນິນຊີທີ່ເປັນໂລກິຍະກໍມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ສັດທາທີ່ເປັນໂລກິຍະມີຢູ່ ສັດທິນຊີທີ່ເປັນໂລກິຍະກໍມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ມະໂນທີ່ເປັນໂລກິຍະມີຢູ່ ມະນິນຊີທີ່ເປັນໂລກິຍະກໍມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ປັນຍາທີ່ເປັນໂລກິຍະມີຢູ່ ປັນຍິນຊີທີ່ເປັນໂລກິຍະກໍມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ໂສມະນັດທີ່ເປັນໂລກິຍະມີຢູ່ ໂສມະນັດສິນຊີທີ່ເປັນໂລກິຍະກໍມີຢູ່ ฯລฯ ຊີວິດທີ່ເປັນໂລກິຍະມີຢູ່ ຊີວິຕິນຊີທີ່ເປັນໂລກິຍະກໍມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ສັດທາທີ່ເປັນໂລກິຍະມີຢູ່ ສັດທິນຊີທີ່ເປັນໂລກິຍະກໍມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຊີວິດທີ່ເປັນໂລກິຍະມີຢູ່ ຊີວິຕິນຊີທີ່ເປັນໂລກິຍະກໍມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ປັນຍາທີ່ເປັນໂລກິຍະມີຢູ່ ປັນຍິນຊີທີ່ເປັນໂລກິຍະກໍມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໕໔] ສກ. ສັດທາທີ່ເປັນໂລກິຍະມີຢູ່ ສັດທິນຊີທີ່ເປັນໂລກິຍະບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ມະໂນທີ່ເປັນໂລກິຍະມີຢູ່ ມະນິນຊີທີ່ເປັນໂລກິຍະບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ປັນຍາທີ່ເປັນໂລກິຍະມີຢູ່ ປັນຍິນຊີທີ່ເປັນໂລກິຍະບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ມະໂນທີ່ເປັນໂລກິຍະມີຢູ່ ມະນິນຊີທີ່ເປັນໂລກິຍະບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສັດທາທີ່ເປັນໂລກິຍະມີຢູ່ ສັດທິນຊີທີ່ເປັນໂລກິຍະບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ໂສມະນັດທີ່ເປັນໂລກິຍະມີຢູ່ ໂສມະນັດສິນຊີທີ່ເປັນໂລກິຍະບໍ່ມີ ຊີວິດທີ່ເປັນໂລກິຍະມີຢູ່ ຊີວິຕິນຊີທີ່ເປັນໂລກິຍະບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ປັນຍາທີ່ເປັນໂລກິຍະມີຢູ່ ປັນຍິນຊີທີ່ເປັນໂລກິຍະບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ມະໂນທີ່ເປັນໂລກິຍະມີຢູ່ ມະນິນຊີທີ່ເປັນໂລກິຍະບໍ່ມີ ຯລຯ ຊີວິດທີ່ເປັນໂລກິຍະມີຢູ່ ຊີວິຕິນຊີທີ່ເປັນໂລກິຍະບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໕໕] ສກ. ສັດທາທີ່ເປັນໂລກຸດຕະຣະມີຢູ່ ສັດທິນຊີທີ່ເປັນໂລກຸດຕະຣະກໍມີຢູ່ ແມ່ນບໍ?

ປຣ. ແມ່ນ

ສກ. ສັດທາທີ່ເປັນໂລກິຍະມີຢູ່ ສັດທິນຊີທີ່ເປັນໂລກິຍະກໍມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວິຣິຍະທີ່ເປັນໂລກຸດຕະຣະມີຢູ່ ຯລຯ ປັນຍາທີ່ເປັນໂລກຸດຕະຣະມີຢູ່ ປັນຍິນຊີ ທີ່ເປັນໂລກຸດຕະຣະກໍມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ປັນຍາທີ່ເປັນໂລກິຍະມີຢູ່ ປັນຍິນຊີທີ່ເປັນໂລກິຍະກໍມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສັດທາທີ່ເປັນໂລກິຍະມີຢູ່ ສັດທິນຊີທີ່ເປັນໂລກິຍະບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ສັດທາທີ່ເປັນໂລກຸດຕະຣະມີຢູ່ ສັດທິນຊີທີ່ເປັນໂລກຸດຕະຣະບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ວິຣິຍະທີ່ເປັນໂລກິຍະມີຢູ່ ຯລຯ ປັນຍາທີ່ເປັນໂລກິຍະມີຢູ່ ປັນຍິນຊີທີ່ເປັນໂລກິຍະບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ປັນຍາທີ່ເປັນໂລກຸດຕະຣະມີຢູ່ ປັນຍິນຊີທີ່ເປັນໂລກຸດຕະຣະບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໕໖] ສກ. ອິນຊີ ໕ ທີ່ເປັນໂລກິຍະບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ເຮົາເມື່ອກວດເບິ່ງໂລກດ້ວຍພຸດທະຈັກຂຸ ກໍໄດ້ເຫັນສັດທັງຫຼາຍຜູ້ມີທຸລີໃນດວງຕາໜ້ອຍ ມີທຸລີໃນດວງຕາຫຼາຍ ມີອິນຊີແກ່ກ້າ ມີອິນຊີອ່ອນ ມີອາການດີ ມີອາການຊາມ ສອນໃຫ້ຮູ້ໄດ້ງ່າຍ ສອນໃຫ້ຮູ້ໄດ້ຍາກ ບາງພວກເຫັນປະຣະໂລກ ແລະໂທດວ່າເປັນສິ່ງເປັນຕາຢ້ານ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ອິນຊີ ໕ ທີ່ເປັນໂລກິຍະຈຶ່ງມີຢູ່

**ອິນທະຣິຍະກະຖາ ຈົບ**

**ເອກູນະວີສະຕິມະວັກ ຈົບ**

## ລວມກະຖາທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ກິເລສະຊະຫະນະກະຖາ | ໔. ສູນຍະຕາກະຖາ |
| ໒. ສາມັນຍະຜະລະກະຖາ | ໘. ປັດຕິກະຖາ |
| ໕. ຕະຖະຕາກະຖາ | ໖. ກຸສະລະກະຖາ |
| ໗. ອັດຈັນຕະນິຍາມະກະຖາ | ໙. ອິນທະຣິຍະກະຖາ |

# ໔໐. ວິສະຕິມະວັກ

## ໑. ອະສັນຈິດຈະກະຖາ (໑໗໘)

### ວ່າດ້ວຍຄວາມບໍ່ຈິງໃຈ

[໗໕໑] ສກ. ບຸກຄົນບໍ່ຈິງໃຈປົງຊີວິດມານດາ ຊື່ວ່າເປັນຜູ້ເຮັດອະນັນຕະຣິຍະກຳ ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນບໍ່ຈິງໃຈຂ້າສັດ ຊື່ວ່າເປັນຜູ້ເຮັດປານາຕິບາດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນບໍ່ຈິງໃຈປົງຊີວິດມານດາ ຊື່ວ່າເປັນຜູ້ເຮັດອະນັນຕະຣິຍະກຳແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນບໍ່ຈິງໃຈຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ ຯລຯ ເວົ້າຕົວະ ຊື່ວ່າເປັນຜູ້ເວົ້າຕົວະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນບໍ່ຈິງໃຈຂ້າສັດ ຊື່ວ່າບໍ່ເປັນຜູ້ເຮັດປານາຕິບາດແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນບໍ່ຈິງໃຈປົງຊີວິດມານດາ ຊື່ວ່າບໍ່ເປັນຜູ້ເຮັດອະນັນຕະຣິຍະກຳແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນບໍ່ຈິງໃຈຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ ຯລຯ ບໍ່ຈິງໃຈເວົ້າຕົວະ ຊື່ວ່າບໍ່ເປັນຜູ້ເວົ້າຕົວະແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນບໍ່ຈິງໃຈປົງຊີວິດມານດາ ຊື່ວ່າບໍ່ເປັນຜູ້ເຮັດອະນັນຕະຣິຍະກຳແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໕໒] ສກ. ບຸກຄົນບໍ່ຈິງໃຈປົງຊີວິດມານດາ ຊື່ວ່າເປັນຜູ້ເຮັດອະນັນຕະຣິຍະກຳແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ວ່າ "ບຸກຄົນບໍ່ຈິງໃຈປົງຊີວິດມານດາ ຊື່ວ່າເປັນຜູ້ເຮັດອະນັນຕະຣິຍະກຳ" ມີຢູ່ຈິງບໍ?

ປຣ. ບໍ່ມີ

ສກ. ພຣະສູດທີ່ວ່າ "ບຸກຄົນຈົງໃຈປົງຊີວິດມານດາ ຊື່ວ່າເປັນຜູ້ເຮັດອະນັນຕະຣິຍະກຳ" ມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະສູດທີ່ວ່າ "ບຸກຄົນຈົງໃຈປົງຊີວິດມານດາ ຊື່ວ່າເປັນຜູ້ເຮັດອະນັນຕະຣິຍະກຳ" ມີຢູ່ຈິງ ທ່ານກໍບໍ່ຄວນຍອມຮັບວ່າ "ບຸກຄົນບໍ່ຈົງໃຈປົງຊີວິດມານດາ ຊື່ວ່າເປັນຜູ້ເຮັດອະນັນຕະຣິຍະກຳ"

[໗໕໙] ປຣ. ທ່ານບໍ່ຍອມຮັບວ່າ "ບຸກຄົນຜູ້ຂ້າມານດາ ຊື່ວ່າ ເປັນຜູ້ເຮັດອະນັນຕະຣິຍະກຳ" ແມ່ນບໍ?

ສກ. ແມ່ນ

ປຣ. ເຂົາປົງຊີວິດມານດາແລ້ວບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກເຂົາປົງຊີວິດມານດາແລ້ວ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ບຸກຄົນຜູ້ຂ້າມານດາ ຊື່ວ່າ ເປັນຜູ້ເຮັດອະນັນຕະຣິຍະກຳ"

ປຣ. ທ່ານບໍ່ຍອມຮັບວ່າ "ບຸກຄົນຜູ້ຂ້າບິດາ ຊື່ວ່າ ເປັນຜູ້ເຮັດອະນັນຕະຣິຍະກຳ" ແມ່ນບໍ?

ສກ. ແມ່ນ

ປຣ. ເຂົາປົງຊີວິດບິດາແລ້ວບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກເຂົາປົງຊີວິດບິດາແລ້ວ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ບຸກຄົນຜູ້ຂ້າບິດາ ຊື່ວ່າເປັນຜູ້ເຮັດອະນັນຕະຣິຍະກຳ"

ປຣ. ທ່ານບໍ່ຍອມຮັບວ່າ "ບຸກຄົນຜູ້ຂ້າພຣະອະຣະຫັນ ຊື່ວ່າເປັນຜູ້ເຮັດອະນັນຕະຣິຍະ-ກຳ" ແມ່ນບໍ?

ສກ. ແມ່ນ

ປຣ. ເຂົາປົງຊີວິດພຣະອະຣະຫັນແລ້ວບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກເຂົາປົງຊີວິດພຣະອະຫັນແລ້ວ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ບຸກຄົນຜູ້ຂ້າພຣະອະຣະຫັນ ຊື່ວ່າເປັນຜູ້ເຮັດອະນັນຕະຣິຍະກຳ"

ປຣ. ທ່ານບໍ່ຍອມຮັບວ່າ "ບຸກຄົນຜູ້ທຳຮ້າຍພຣະຕະຖາຄົດເຈົ້າຈົນເຖິງພຣະໂລຫິດຫໍ້ ຊື່ວ່າ ເປັນຜູ້ເຮັດອະນັນຕະຣິຍະກຳ" ແມ່ນບໍ?

ສກ. ແມ່ນ

ປຣ. ເຂົາທຳຮ້າຍພຣະຕະຖາຄົດເຈົ້າຈົນເຖິງພຣະໂລຫິດຫໍ້ແລ້ວບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກເຂົາທຳຮ້າຍພຣະຕະຖາຄົດເຈົ້າຈົນເຖິງພຣະໂລຫິດຫໍ້ແລ້ວ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ບຸກຄົນຜູ້ທຳຮ້າຍພຣະຕະຖາຄົດເຈົ້າຈົນເຖິງພຣະໂລຫິດຫໍ້ ຊື່ວ່າເປັນຜູ້ເຮັດອະນັນຕະຣິຍະກຳ"

[໙໖໐] ສກ. ບຸກຄົນຜູ້ທຳລາຍສົງໃຫ້ແຕກກັນ ຊື່ວ່າເປັນຜູ້ເຮັດອະນັນຕະຣິຍະກຳແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ທຳລາຍສົງໃຫ້ແຕກກັນທັງໝົດ ຊື່ວ່າເປັນຜູ້ເຮັດອະນັນຕະຣິຍະກຳແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນຜູ້ທຳລາຍສົງໃຫ້ແຕກກັນທັງໝົດ ຊື່ວ່າເປັນຜູ້ເຮັດອະນັນຕະຣິຍະກຳແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ມີຄວາມສຳຄັນວ່າຊອບທຳ ຈຶ່ງທຳລາຍສົງໃຫ້ແຕກກັນ ຊື່ວ່າເປັນຜູ້ເຮັດອະນັນຕະຣິຍະກຳແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໙໖໑] ສກ. ບຸກຄົນຜູ້ມີຄວາມສຳຄັນວ່າຊອບທຳ ຈຶ່ງທຳລາຍສົງໃຫ້ແຕກກັນ ຊື່ວ່າເປັນຜູ້ເຮັດອະນັນຕະຣິຍະກຳແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ອຸປາລີ ບຸກຄົນຜູ້ທຳລາຍສົງໃຫ້ແຕກກັນເປັນຜູ້ເຂົ້າເຖິງອະບາຍ ຢູ່ໃນນະຣົກຕະຫຼອດກັບ ແກ້ໄຂບໍ່ໄດ້ ມີຢູ່ ບຸກຄົນຜູ້ທຳລາຍສົງໃຫ້ແຕກກັນ ບໍ່ເປັນຜູ້ເຂົ້າເຖິງອະບາຍ ບໍ່ເຂົ້າເຖິງນະຣົກຕະຫຼອດກັບ ບໍ່ແມ່ນຜູ້ແກ້ໄຂບໍ່ໄດ້" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ບຸກຄົນຜູ້ມີຄວາມສຳຄັນວ່າຊອບທຳ ທຳລາຍສົງໃຫ້ແຕກກັນ ຊື່ວ່າເປັນຜູ້ເຮັດອະນັນຕະຣິຍະກຳ"

[໙໖໔] ປຣ. ທ່ານບໍ່ຍອມຮັບວ່າ "ບຸກຄົນຜູ້ມີຄວາມສຳຄັນວ່າຊອບທຳຈຶ່ງທຳລາຍສົງໃຫ້ແຕກກັນ ຊື່ວ່າເປັນຜູ້ເຮັດອະນັນຕະຣິຍະກຳ" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ບຸກຄົນຜູ້ທຳລາຍສົງໃຫ້ແຕກກັນ ຍິນດີໃນການແຕກກັນ
ຢູ່ໃນອະທຳ ເປັນຜູ້ເຂົ້າເຖິງອະບາຍ ຢູ່ໃນນະຣົກຕະຫຼອດກັບ
ພາດຈາກນິບພານອັນເປັນທຳກະເສມຈາກໂຍຄະ
ສະເຫວີຍຜົນກຳຢູ່ໃນນະຣົກຕະຫຼອດກັບ

ຍ້ອນທຳລາຍສົງທີ່ສາມັກຄີກັນໃຫ້ແຕກແຍກກັນ

ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ບຸກຄົນຜູ້ທຳລາຍສົງໃຫ້ແຕກກັນ ຈຶ່ງຊື່ວ່າເປັນຜູ້ເຮັດອະນັນຕະຣິຍະກຳ

**ອະສັນຈິດຈະກະຖາ ຈົບ**

## ໔. ຍານະກະຖາ (໑໙໔)

## ວ່າດ້ວຍຍານ

[໗໖໓] ສກ. ຍານ ບໍ່ມີແກ່ປຸຖຸຊົນແມ່ນບໍ?

ປຣ. ແມ່ນ

ສກ. ປັນຍາ ກິຣິຍາທີ່ຮູ້ຊັດແຈ້ງ ຄວາມວິໄຈ ຄວາມເລືອກ ຄວາມວິໄຈທຳ ຄວາມກຳນົດໝາຍ ຄວາມເຂົ້າໄປກຳນົດ ຄວາມເຂົ້າໄປກຳນົດຈຳເພາະ ບໍ່ມີແກ່ປຸຖຸຊົນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ປັນຍາ ກິຣິຍາທີ່ຮູ້ຊັດແຈ້ງ ຄວາມວິໄຈ ຯລຯ ຄວາມເຂົ້າໄປກຳນົດຈຳເພາະຂອງປຸຖຸຊົນມີຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກປັນຍາ ກິຣິຍາທີ່ຮູ້ຊັດແຈ້ງ ຄວາມວິໄຈ ຯລຯ ຄວາມເຂົ້າໄປກຳນົດຈຳເພາະຂອງປຸຖຸຊົນມີຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ຍານບໍ່ມີແກ່ປຸຖຸຊົນ"

[໗໖໔] ສກ. ຍານບໍ່ມີແກ່ປຸຖຸຊົນແມ່ນບໍ?

ປຣ. ແມ່ນ

ສກ. ປຸຖຸຊົນເຂົ້າປະຖົມຊານໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຫາກປຸຖຸຊົນເຂົ້າປະຖົມຊານໄດ້ ທ່ານກໍບໍ່ຄວນຍອມຮັບວ່າ "ຍານບໍ່ມີແກ່ປຸຖຸຊົນ"

ສກ. ປຸຖຸຊົນເຂົ້າທຸຕິຍະຊານ ຯລຯ ຕະຕິຍະຊານ ຯລຯ ຈະຕຸດຖະຊານ ຯລຯ ອາກາສານັນຈາຍະຕະນະຊານ ຯລຯ ວິນຍານັນຈາຍະຕະນະຊານ ຯລຯ ອາກິນຈັນຍາຍະຕະນະຊານ ຯລຯ ເນວະສັນຍານາສັນຍາຍະຕະນະຊານ ຯລຯ ເພິ່ງໃຫ້ທານ ຯລຯ ຈີວອນ ຯລຯ ບິນທະບາດ ຯລຯ ເສນາສະນະ ຯລຯ ຄິລານະປັດໄຈເພສັດບໍຣິຂານໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ຫາກປຸຖຸຊົນໃຫ້ຄືລານະປັດໄຈເພສັດບໍຣິຂານໄດ້ ທ່ານກໍບໍ່ຄວນຍອມຮັບວ່າ "ຍານບໍ່ມີແກ່ປຸຖຸຊົນ"

[໙໖໘] ປຣ. ຍານຂອງປຸຖຸຊົນມີຢູ່ແມ່ນບໍ?

ສກ. ແມ່ນ

ປຣ. ປຸຖຸຊົນກໍານົດຮູ້ທຸກ ລະສະມຸໄທ ເຮັດໃຫ້ແຈ້ງນິໂຣດ ຈະເລີນມັກໄດ້ ດ້ວຍຍານນັ້ນແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ฯลฯ

**ຍານະກະຖາ ຈົບ**

## ໖. ນິຣະຍະປາລະກະຖາ (໑໙໖)

## ວ່າດ້ວຍນາຍນິຣະຍະບານ

[໙໖໖] ສກ. ນາຍນິຣະຍະບານບໍ່ມີໃນນະຣົກແມ່ນບໍ?

ປຣ. ແມ່ນ

ສກ. ເຄື່ອງສໍາລັບລົງອາຍາບໍ່ມີໃນນະຣົກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ເຄື່ອງສໍາລັບລົງອາຍາມີຢູ່ໃນນະຣົກແມ່ນບໍ?

ປຣ. ແມ່ນ

ສກ. ນາຍນິຣະຍະບານມີຢູ່ໃນນະຣົກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ເຄື່ອງສໍາລັບລົງອາຍາມີຢູ່ໃນມະນຸດແລະຜູ້ລົງອາຍາກໍມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ເຄື່ອງສໍາລັບລົງອາຍາມີຢູ່ໃນນະຣົກແລະຜູ້ລົງອາຍາກໍມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

ສກ. ເຄື່ອງສໍາລັບລົງອາຍາມີຢູ່ໃນນະຣົກ ແຕ່ຜູ້ລົງອາຍາບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ເຄື່ອງສໍາລັບລົງອາຍາມີຢູ່ໃນມະນຸດ ແຕ່ຜູ້ລົງອາຍາບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯลฯ

[໙໖໗] ປຣ. ນາຍນິຣະຍະບານມີຢູ່ໃນນະຣົກແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ທ້າວເວດສະພູ ທ້າວເປຕະຕິຣາດ
ທ້າວໂສມະບໍ່ໄດ້ຂ້າ ທ້າວຍະມະ
ແລະທ້າວເວສະວັນກໍບໍ່ໄດ້ຂ້າ
ກຳຂອງຕົນເອງຂ້າບຸກຄົນຜູ້ສິ້ນບຸນຈາກໂລກນີ້
ເກີດໃນປະລະໂລກໃນນະຣົກນັ້ນ"

ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ນາຍນິຣະຍະບານຈຶ່ງບໍ່ມີໃນນະຣົກ

[໗໖໗] ສກ. ນາຍນິຣະຍະບານບໍ່ມີໃນນະຣົກແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ນາຍນິຣະຍະບານເຮັດເຄື່ອງຈອງຈຳ (ເຄື່ອງສຳລັບລົງອາຍາ) ຊື່ເຄື່ອງພັນທະນາການ ໕ ຢ່າງ ຄື ຕອກຕະປູ ເຫຼັກແດງທີ່ມື ໒ ຂ້າງ ທີ່ຕີນ ໒ ຂ້າງ ແລະທີ່ກາງເອິກ ເຂົາສະເຫວີຍທຸກຂະເວທະນາກ້າຢ່າງໜັກເຜັດຮ້ອນໃນບ່ອນນັ້ນ ແຕ່ຍັງບໍ່ຕາຍຕາບເທົ່າທີ່ບາບກຳຍັງບໍ່ສິ້ນໄປ"

ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ນາຍນິຣະຍະບານຈຶ່ງມີຢູ່ໃນນະຣົກ

ສກ. ນາຍນິຣະຍະບານບໍ່ມີໃນນະຣົກແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ນາຍນິຣະຍະບານລາກເຂົາໄປ ເອົາຂວານຖາກ ນາຍນິຣະຍະບານຈັບເຂົາເອົາຕີນຂຶ້ນ ເອົາຫົວລົງ ເອົາມີດປາດ ຯລຯ ຈັບເຂົາຫຼຸມລົດແລ່ນກັບໄປກັບມາບົນພື້ນອັນຮ້ອນລຸກເປັນແປວໄຟຮຸ່ງສະຫວ່າງແຈ້ງ ຯລຯ ບັງຄັບເຂົາຂຶ້ນລົງພູເຂົາຖ່ານເພີງລູກໃຫຍ່ທີ່ໄຟລຸກຮ້ອນແດງ ຯລຯ ຈັບເຂົາເອົາຕີນຂຶ້ນເອົາຫົວລົງ ຖິ້ມລົງໄປໃນໂລຫະກຸມພີອັນຮ້ອນແດງ ລຸກເປັນແສງໄຟ ເຂົາຖືກຕົ້ມຟົດຈົນຕົວພອງໃນໂລຫະກຸມພີນັ້ນ ບາງເທື່ອລອຍຂຶ້ນ ບາງເທື່ອຈົມລົງ ບາງເທື່ອລອຍຂວາງ ເຂົາສະເຫວີຍທຸກຂະເວທະນາກ້າຢ່າງໜັກ ເຜັດຮ້ອນຢູ່ໃນໃນໂລຫະກຸມພີອັນຮ້ອນແດງນັ້ນ ແຕ່ຍັງບໍ່ຕາຍຕາບເທົ່າທີ່ບາບກຳຍັງບໍ່ສິ້ນໄປ ນາຍນິຣະຍະບານຈັບເຂົາຖິ້ມລົງໄປໃນມະຫານະຣົກ ກໍມະຫານະຣົກນັ້ນ (ມີລັກສະນະ) ດັ່ງນີ້

ມີ ໔ ແຈ ໔ ປະຕູ ແບ່ງກຳນົດອອກເປັນສ່ວນ
ມີກຳແພງເຫຼັກລ້ອມຮອບ ຄອບດ້ວຍຝາເຫຼັກ
ມີພື້ນເປັນເຫຼັກລຸກຮຸ່ງສະຫວ່າງແຈ້ງ
ແຜ່ຄວາມຮ້ອນໄກດ້ານລະ ໑໐໐ ໂຍດ
ຕັ້ງຢູ່ທຸກເມື່ອ”

ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ນາຍນິຣະຍະບານຈຶ່ງມີຢູ່ໃນນະຣົກ

**ນິຣະຍະປາລະກະຖາ ຈົບ**

## ໔. ຕິຣັດສານະກະຖາ (໑໙)
## ວ່າດ້ວຍສັດເດຍຣັດສານ

[໗໖໙] ສກ. ສັດເດຍຣັດສານມີຢູ່ໃນໝູ່ເທວະດາແມ່ນບໍ?

ປຣ. ແມ່ນ

ສກ. ເທວະດາມີຢູ່ໃນໝູ່ສັດເດຍຣັດສານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສັດເດຍຣັດສານມີຢູ່ໃນໝູ່ເທວະດາແມ່ນບໍ?

ປຣ. ແມ່ນ

ສກ. ເທວະໂລກເປັນພູມຂອງສັດເດຍຣັດສານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສັດເດຍຣັດສານມີຢູ່ໃນໝູ່ເທວະດາແມ່ນບໍ?

ປຣ. ແມ່ນ

ສກ. ໃນໝູ່ເທວະດານັ້ນ ມີແມງໄມ້ ຕັກກະແຕນ ຍຸງ ແມງວັນ ງູ ແມງງອດ ຂີ້ເຂັບ ໄສ້ເດືອນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໘໐] ປຣ. ສັດເດຍຣັດສານບໍ່ມີໃນໝູ່ເທວະດາແມ່ນບໍ?

ສກ. ແມ່ນ

ປຣ. ຊ້າງປະເສີດຊື່ວ່າເອຣາວັນ ຍານທິບທຽມດ້ວຍມ້າພັນຕົວມີຢູ່ໃນໝູ່ເທວະດານັ້ນບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກຊ້າງປະເສີດຊື່ວ່າເອຣາວັນ ຍານທິບຫຽມດ້ວຍມ້າພັນຕົວມີຢູ່ໃນໝູ່ເທວະດານັ້ນ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ສັດເດຍຣັດສານມີຢູ່ໃນເທວະໂລກ"

[໘໗໑] ສກ. ສັດເດຍຣັດສານມີຢູ່ໃນເທວະໂລກແມ່ນບໍ?

ປຣ. ແມ່ນ

ສກ. ໃນເທວະໂລກນັ້ນ ມີພວກຜູກຊ້າງ ພວກຜູກມ້າ ພວກຕະພຸ່ນຫຍ້າ ພວກຜູ້ຝຶກພວກເຮັດອາຫານສັດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ດັ່ງນັ້ນ ສັດເດຍຣັດສານຈຶ່ງບໍ່ມີໃນເທວະໂລກ

**ຕິຣັດສານະກະຖາ ຈົບ**

## ໕. ມັກຄະກະຖາ (໑໙໘)
## ວ່າດ້ວຍມັກ

[໘໗໔] ສກ. ມັກມີອົງ ໕ ແມ່ນບໍ?

ປຣ. ແມ່ນ

ສກ. ມັກມີອົງ ໘ ຄື ສຳມາທິດຖິ ໆລໆ ສຳມາສະມາທິ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກມັກມີອົງ ໘ ຄື ສຳມາທິດຖິ ໆລໆ ສຳມາສະມາທິ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ທ່ານກໍບໍ່ຄວນຍອມຮັບວ່າ "ມັກມີອົງ ໕"

ສກ. ມັກມີອົງ ໕ ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ບັນດາມັກ ມັກມີອົງ ໘ ປະເສີດທີ່ສຸດ
ບັນດາສັດຈະ ສັດຈະ ໔ ປະເສີດທີ່ສຸດ
ບັນດາທຳ ວິຣາຄະທຳ ປະເສີດທີ່ສຸດ
ບັນດາສັດສອງຕີນ ພຣະຕະຖາຄົດຜູ້ມີພຣະຈັກຂຸ ປະເສີດທີ່ສຸດ"

ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ມັກຈຶ່ງມີອົງ ໗

[໗໗໓] ສກ. ສຳມາວາຈາເປັນອົງມັກ ແຕ່ສຳມາວາຈານັ້ນບໍ່ເປັນມັກແມ່ນບໍ?

ປຣ. ແມ່ນ

ສກ. ສຳມາທິດຖິເປັນອົງມັກ ແຕ່ສຳມາທິດຖິນັ້ນບໍ່ເປັນມັກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ສຳມາວາຈາເປັນອົງມັກ ແຕ່ສຳມາວາຈານັ້ນບໍ່ເປັນມັກແມ່ນບໍ?

ປຣ. ແມ່ນ

ສກ. ສຳມາສັງກັບປະ ໆລໆ ສຳມາວາຍາມະ ໆລໆ ສຳມາສະຕິ ໆລໆ ສຳມາສະມາທິ ເປັນອົງມັກ ແຕ່ສຳມາສະມາທິນັ້ນບໍ່ເປັນມັກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ສຳມາກຳມັນຕະ ໆລໆ ສຳມາອາຊີວະ ເປັນອົງມັກ ແຕ່ສຳມາອາຊີວະນັ້ນບໍ່ເປັນມັກແມ່ນບໍ?

ປຣ. ແມ່ນ

ສກ. ສຳມາທິດຖິ ໆລໆ ສຳມາສະມາທິ ເປັນອົງມັກ ແຕ່ສຳມາສະມາທິນັ້ນບໍ່ເປັນມັກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ສຳມາທິດຖິເປັນອົງມັກ ແລະສຳມາທິດຖິນັ້ນເປັນມັກແມ່ນບໍ?

ປຣ. ແມ່ນ

ສກ. ສຳມາວາຈາເປັນອົງມັກ ແລະສຳມາວາຈານັ້ນເປັນມັກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ສຳມາທິດຖິເປັນອົງມັກ ແລະສຳມາທິດຖິນັ້ນເປັນມັກແມ່ນບໍ?

ປຣ. ແມ່ນ

ສກ. ສຳມາກຳມັນຕະ ໆລໆ ສຳມາອາຊີວະ ເປັນອົງມັກ ແລະສຳມາອາຊີວະນັ້ນເປັນມັກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

ສກ. ສຳມາສັງກັບປະ ໆລໆ ສຳມາວາຍາມະ ໆລໆ ສຳມາສະຕິ ໆລໆ ສຳມາສະມາທິ ເປັນອົງມັກ ແລະສຳມາສະມາທິນັ້ນເປັນມັກແມ່ນບໍ?

ປຣ. ແມ່ນ

ສກ. ສຳມາວາຈາ ໆລໆ ສຳມາກຳມັນຕະ ໆລໆ ສຳມາອາຊີວະ ເປັນອົງມັກ ແລະສຳມາອາຊີວະນັ້ນເປັນມັກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ໆລໆ

[໙໗໔] ປຣ. ອະຣິຍະມັກມີອົງ ໘ ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ກາຍຍະກຳ ວະຈີກຳ ອາຊີວະຂອງບຸກຄົນນັ້ນຈັດວ່າບໍລິສຸດດີແລ້ວໃນເບື້ອງຕົ້ນນັ້ນແລ ເມື່ອເປັນແນວນີ້ອະຣິຍະມັກມີອົງ ໘ ນີ້ຂອງເຂົາຍ່ອມເຖິງຄວາມຈະເລີນເຕັມທີ່" ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ມັກຈຶ່ງມີອົງ

[໙໗໕] ສກ. ມັກມີອົງ ໕ ແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ສຸພັດທະ ໃນທຳວິໄນທີ່ບໍ່ມີອະຣິຍະມັກມີອົງ ໘ ຍ່ອມບໍ່ມີສະມະນະທີ ໑ ຍ່ອມບໍ່ມີສະມະນະທີ ໒ ຍ່ອມບໍ່ມີສະມະນະທີ ໓ ຍ່ອມບໍ່ມີສະມະນະທີ ໔ ໃນທຳວິໄນທີ່ມີອະຣິຍະມັກມີອົງ ໘ ຍ່ອມມີສະມະນະທີ ໑ ຍ່ອມມີສະມະນະທີ ໒ ຍ່ອມມີສະມະນະທີ ໓ ຍ່ອມມີສະມະນະທີ ໔ ສຸພັດທະ ໃນທຳວິໄນນີ້ມີອະຣິຍະ ມັກມີອົງ ໘ ສະມະນະທີ ໑ ມີຢູ່ໃນທຳວິໄນນີ້ເທົ່ານັ້ນ ສະມະນະທີ ໒ ມີຢູ່ໃນທຳວິໄນນີ້ເທົ່ານັ້ນ ສະມະນະທີ ໓ ມີຢູ່ໃນທຳວິໄນນີ້ເທົ່ານັ້ນ ສະມະນະທີ ໔ ກໍມີຢູ່ໃນທຳວິໄນນີ້ເທົ່ານັ້ນ ລັດທິອື່ນວ່າງຈາກສະມະນະທັງຫຼາຍຜູ້ຮູ້ທົ່ວເຖິງ ສຸພັດທະ ຖ້າພິກຂຸເຫຼົ່ານີ້ເປັນຢູ່ໂດຍຊອບ ໂລກຈະບໍ່ເພິ່ງວ່າງຈາກພຣະອະຣະຫັນທັງຫຼາຍ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ມັກຈຶ່ງມີອົງ ໘

**ມັກຄະກະຖາ ຈົບ**

## ໖. ຍານະກະຖາ (໑໖໙)

## ວ່າດ້ວຍຍານ

[໙໗໖] ສກ. ຍານທີ່ມີວັດຖຸ ໑໒ ເປັນໂລກຸດຕະຣະແມ່ນບໍ?

ປຣ.໒ ແມ່ນ

ສກ. ໂລກຸດຕະຣະຍານມີ ໑໒ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂລກຸດຕະຣະຍານມີ ໑໒ ແມ່ນບໍ?

ປຣ. ແມ່ນ

ສກ. ໂສດາປັດຕິມັກມີ ໑໘ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂສດາປັດຕິມັກມີ ໑໘ ແມ່ນບໍ?

ປຣ. ແມ່ນ

ສກ. ໂສດາປັດຕິຜົນມີ ໑໘ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສະກະທາຄາມິມັກ ຯລຯ ອະນາຄາມິມັກ ຯລຯ ອະຣະຫັດຕະມັກມີຢ່າງລະ ໑໘ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອະຣະຫັດຕະມັກມີ ໑໘ ແມ່ນບໍ?

ປຣ. ແມ່ນ

ສກ. ອະຣະຫັດຕະຜົນມີ ໑໘ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[ຫຼາກ] ປຣ. ທ່ານບໍ່ຍອມຮັບວ່າ “ຍານທີ່ມີວັດຖຸ ໑໘ ເປັນໂລກຸດຕະຣະ” ແມ່ນບໍ?

ສກ. ແມ່ນ

ປຣ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ “ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວໃນທຳທັງຫຼາຍທີ່ເຮົາບໍ່ເຄີຍສະດັບມາກ່ອນວ່າ ນີ້ທຸກຂະອະຣິຍະສັດ ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວໃນທຳທັງຫຼາຍທີ່ເຮົາບໍ່ເຄີຍສະດັບມາກ່ອນວ່າ ທຸກຂະອະຣິຍະສັດນີ້ ຄວນກຳນົດຮູ້ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວໃນທຳທັງຫຼາຍທີ່ເຮົາບໍ່ເຄີຍສະດັບມາກ່ອນວ່າ ທຸກຂະອະຣິຍະສັດນີ້ ເຮົາໄດ້ກຳນົດຮູ້ແລ້ວ

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວໃນທຳທັງຫຼາຍທີ່ເຮົາບໍ່ເຄີຍສະດັບມາກ່ອນວ່າ ນີ້ທຸກຂະສະມຸທະຍະອະຣິຍະສັດ

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວໃນທຳທັງຫຼາຍທີ່ເຮົາບໍ່ເຄີຍສະດັບມາກ່ອນວ່າ ທຸກຂະສະມຸທະຍະອະຣິຍະສັດນີ້ ຄວນລະສາ

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວໃນທຳທັງຫຼາຍທີ່ເຮົາບໍ່ເຄີຍສະດັບມາກ່ອນວ່າ ທຸກຂະສະມຸທະຍະອະຣິຍະສັດນີ້ ເຮົາລະໄດ້ແລ້ວ

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວໃນທຳທັງຫຼາຍທີ່ເຮົາບໍ່ເຄີຍສະດັບມາກ່ອນວ່າ ນີ້ທຸກຂະນິໂຣທະອະຣິຍະສັດ

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວໃນທຳທັງຫຼາຍທີ່ເຮົາບໍ່ເຄີຍສະດັບມາກ່ອນວ່າ ທຸກຂະນິໂຣທະອະຣິຍະສັດນີ້ ຄວນເຮັດໃຫ້ແຈ້ງ

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວໃນທຳທັງຫຼາຍທີ່ເຮົາບໍ່ເຄີຍສະດັບມາກ່ອນວ່າ ທຸກຂະນິໂຣທະອະຣິຍະສັດນີ້ ເຮົາໄດ້ເຮັດໃຫ້ແຈ້ງແລ້ວ

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວໃນທຳທັງຫຼາຍທີ່ເຮົາບໍ່ເຄີຍສະດັບມາກ່ອນວ່າ ນີ້ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວໃນທຳທັງຫຼາຍທີ່ເຮົາບໍ່ເຄີຍສະດັບມາກ່ອນວ່າ ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດນີ້ ເຮົາຄວນໃຫ້ຈະເລີນ

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວໃນທຳທັງຫຼາຍທີ່ເຮົາບໍ່ເຄີຍສະດັບມາກ່ອນວ່າ ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດນີ້ ເຮົາໄດ້ໃຫ້ຈະເລີນແລ້ວ" ມີຢູ່ຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ດັ່ງນັ້ນ ຍານທີ່ມີວັດຖຸ ໑໔ ຈຶ່ງເປັນໂລກຸດຕະຣະ

**ຍານະກະຖາ ຈົບ**

**ວີສະຕິມະວັກ ຈົບ**

## ລວມກະຖາທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ອະສັນຈິດຈະກະຖາ | ໔. ຍານະກະຖາ |
| ໒. ນິຣະຍະປາລະກະຖາ | ໕. ຕິຣັດສານະກະຖາ |
| ໓. ມັກຄະກະຖາ | ໖. ຍານະກະຖາ |

**ຈະຕຸດຖະປັນນາດ ຈົບ**

## ລວມວັກທີມີໃນຈະຕຸດຖະປັນນາດນີ້ ຄື

ວັກທີ ໑໖ ເລີ່ມດ້ວຍນິກຄະຫະກະຖາ

ວັກທີ ໑໗ ເລີ່ມດ້ວຍອັດຖິອະຣະຫະໂຕປຸນຍູປັດຈະໂຍຕິກະຖາ

ວັກທີ ໑໘ ເລີ່ມດ້ວຍມະນຸດສະໂລກະກະຖາ

ວັກທີ ໑໙ ເລີ່ມດ້ວຍກິເລສະຊະຫະນະກະຖາ

ວັກທີ ໒໐ ເລີ່ມດ້ວຍອະສັນຈິດຈະກະຖາ

# ໘໑. ເອກະວິສະຕິມະວັກ

## ໑. ສາທະນະກະຖາ (໘໐໐)

### ວ່າດ້ວຍຫຼັກຄຳສອນ

[໗໗໗] ສກ. ຄຳສອນ ດັດແປງໃໝ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ສະຕິປັດຖານດັດແປງໃໝ່ໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄຳສອນດັດແປງໃໝ່ໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ສຳມັບປະທານ ຯລຯ ອິດທິບາດ ຯລຯ ອິນຊີ ຯລຯ ພະລະ ຯລຯ ໂພດຊົງ ດັດແປງໃໝ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄຳສອນທີ່ເປັນອະກຸສົນໃນການກ່ອນ ໃນພາຍຫຼັງດັດແປງໃຫ້ເປັນກຸສົນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄຳສອນທີ່ເນື່ອງດ້ວຍອາສະວະ ຯລຯ ເນື່ອງດ້ວຍສັງໂຍດ ຯລຯ ເນື່ອງດ້ວຍຄັນຖະ ຯລຯ ເນື່ອງດ້ວຍໂອຄະ ຯລຯ ເນື່ອງດ້ວຍໂຍຄະ ຯລຯ ເນື່ອງດ້ວຍນິວອນ ຯລຯ ເນື່ອງດ້ວຍປະຣາມາດ ຯລຯ ເນື່ອງດ້ວຍອຸປາທານ ຯລຯ ເນື່ອງດ້ວຍສັງກິເລດໃນການກ່ອນ ໃນພາຍຫຼັງດັດແປງບໍ່ໃຫ້ເນື່ອງດ້ວຍສັງກິເລດໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນບາງຄົນດັດແປງຄຳສອນຂອງພຣະຕະຖາຄົດເຈົ້າໃໝ່ໄດ້ມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນບາງຄົນດັດແປງສະຕິປັດຖານໃໝ່ໄດ້ມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນບາງຄົນດັດແປງສຳມັບປະທານ ຯລຯ ອິດທິບາດ ຯລຯ ອິນຊີ ຯລຯ ພະລະ ຯລຯ ໂພດຊົງໃໝ່ໄດ້ມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນບາງຄົນດັດແປງຄຳສອນທີ່ເຄີຍເປັນອະກຸສົນໃນການກ່ອນ ໃນພາຍຫຼັງດັດແປງໃຫ້ເປັນກຸສົນໄດ້ມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນບາງຄົນດັດແປງຄຳສອນທີ່ເນື່ອງດ້ວຍອາສະວະ ຯລຯ ເນື່ອງດ້ວຍສັງກິເລດ ໃນການກ່ອນ ໃນພາຍຫຼັງດັດແປງບໍ່ໃຫ້ເນື່ອງດ້ວຍສັງກິເລດໄດ້ມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄຳສອນຂອງພຣະຕະຖາຄົດດັດແປງໃໝ່ອີກໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ສະຕິປັດຖານດັດແປງໃໝ່ອີກໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ສຳມັບປະທານ ຯລຯ ອິດທິບາດ ຯລຯ ອິນຊີ ຯລຯ ພະລະ ຯລຯ ໂພດຊົງ ດັດແປງໃໝ່ອີກໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄຳສອນທີ່ເຄີຍເປັນອະກຸສົນໃນການກ່ອນ ໃນພາຍຫຼັງດັດແປງໃຫ້ເປັນກຸສົນໄດ້ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ຄຳສອນທີ່ເນື່ອງດ້ວຍອາສະວະ ຯລຯ ເນື່ອງດ້ວຍສັງກິເລດໃນການກ່ອນໃນ ພາຍຫຼັງດັດແປງບໍ່ໃຫ້ເນື່ອງດ້ວຍສັງກິເລດໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

**ສາທະນະກະຖາ ຈົບ**

## ໘. ເອກະວິສະຕິກະຖາ (໘໐໑)

## ວ່າດ້ວຍຜູ້ບໍ່ສະຫງັດ

[໙໗໙] ສກ. ປຸຖຸຊົນບໍ່ສະຫງັດຈາກສະພາວະທຳທີ່ເປັນໄປໃນທາດ ໓ ແມ່ນບໍ?

ປຣ. ແມ່ນ

ສກ. ປຸຖຸຊົນບໍ່ສະຫງັດຈາກຜັດສະທີ່ເປັນໄປໃນທາດ ໓ ຯລຯ ເວທະນາທີ່ເປັນໄປໃນ ທາດ ໓ ຯລຯ ສັນຍາທີ່ເປັນໄປໃນທາດ ໓ ຯລຯ ເຈຕະນາທີ່ເປັນໄປໃນທາດ ໓ ຯລຯ ຈິດທີ່ ເປັນໄປໃນທາດ ໓ ຯລຯ ສັດທາທີ່ເປັນໄປໃນທາດ ໓ ຯລຯ ວິຣິຍະທີ່ເປັນໄປໃນທາດ ໓ ຯລຯ ສະຕິທີ່ເປັນໄປໃນທາດ ໓ ຯລຯ ສະມາທິທີ່ເປັນໄປໃນທາດ ໓ ຯລຯ ປັນຍາທີ່ເປັນໄປໃນທາດ ໓ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ປຸຖຸຊົນບໍ່ສະຫງັດຈາກກຳທີ່ເປັນໄປໃນທາດ ໓ ແມ່ນບໍ?

ປຣ. ແມ່ນ

ສກ. ໃນຂະນະທີ່ຖວາຍຈີວອນ ປຸຖຸຊົນເຂົ້າປະຖົມຊານຢູ່ ຯລຯ ເຂົ້າອາກາສານັນຈາຍະຕະນະຊານຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໃນຂະນະທີ່ຖວາຍບິນທະບາດ ຯລຯ ຖວາຍເສນາສະນະ ຯລຯ ຖວາຍຄິລານະປັດໄຈເພສັດບໍຣິຂານ ປຸຖຸຊົນເຂົ້າຈະຕຸດຖະຊານຢູ່ ເຂົ້າເນວະສັນຍານາສັນຍາຍະຕະນະຊານຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໙໙໐] ປຣ. ທ່ານບໍ່ຍອມຮັບວ່າ "ປຸຖຸຊົນບໍ່ສະຫງັດຈາກກຳທີ່ເປັນໄປໃນທາດ ໓" ແມ່ນບໍ?

ສກ. ແມ່ນ

ປຣ. ປຸຖຸຊົນກຳນົດຮູ້ກຳທີ່ໃຫ້ເຂົ້າເຖິງຮູບທາດ ແລະອະຮູບທາດໄດ້ແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ດັ່ງນັ້ນ ປຸຖຸຊົນຈຶ່ງບໍ່ສະຫງັດຈາກກຳທີ່ເປັນໄປໃນທາດ ໓

**ອະວິວິດຕະກະຖາ ຈົບ**

## ໓. ສັນໂຍຊະນະກະຖາ (໘໐໘)

## ວ່າດ້ວຍສັງໂຍດ

[໙໙໑] ສກ. ພຣະໂຍຄີລະສັງໂຍດບາງຢ່າງຍັງບໍ່ໄດ້ແລ້ວ ບັນລຸອະຣະຫັດຕະຜົນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂຍຄີລະສັກກາຍະທິດຖິ ຯລຯ ວິຈິກິດສາ ຯລຯ ສີລັບພະຕະປະຣາມາດ ຯລຯ ຣາຄະ ຯລຯ ໂທສະ ຯລຯ ໂມຫະ ຯລຯ ລະອະໂນດຕັບປະບາງຢ່າງຍັງບໍ່ໄດ້ແລ້ວບັນລຸອະຣະຫັດຕະຜົນມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະໂຍຄີລະສັງໂຍດບາງຢ່າງຍັງບໍ່ໄດ້ແລ້ວບັນລຸອະຣະຫັດຕະຜົນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຍັງມີຣາຄະ (ຄວາມກຳໜັດ) ໂທສະ (ຄວາມຄິດປະທຸດສະຮ້າຍ) ໂມຫະ (ຄວາມຫຼົງ) ມານະ (ຄວາມຖືຕົວ) ມັກຂະ (ຄວາມລົບຫຼູ່ຄຸນທ່ານ) ປະລາສະ (ຄວາມຕີສະເໝີ) ອຸປາຍາດ (ຄວາມຄ່ຳຄວນຮ້ອງໄຫ້) ກິເລດ (ສິ່ງທີ່ເຮັດໃຈໃຫ້ເສົ້າໝອງ) ຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນບໍ່ມີຣາຄະ ໂທສະ ໂມຫະ ມານະ ມັກຂະ ປະລາສະ ອຸປາຍາດ ກິເລດ ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະອະຣະຫັນບໍ່ມີຣາຄະ ຯລຯ ບໍ່ມີກິເລດ ທ່ານກໍບໍ່ຄວນຍອມຮັບວ່າ "ພຣະໂຍຄີລະສັງໂຍດບາງຢ່າງຍັງບໍ່ໄດ້ແລ້ວບັນລຸອະຣະຫັດຕະຜົນມີຢູ່"

[໗໗໔] ປຣ. ທ່ານບໍ່ຍອມຮັບວ່າ "ພຣະໂຍຄີລະສັງໂຍດບາງຢ່າງຍັງບໍ່ໄດ້ແລ້ວບັນລຸອະຣະຫັດຕະຜົນມີຢູ່" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະອະຣະຫັນຍ່ອມຮູ້ພຸດທະຂອບເຂດໄດ້ທັງໝົດແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ດັ່ງນັ້ນ ພຣະໂຍຄີລະສັງໂຍດບາງຢ່າງຍັງບໍ່ໄດ້ແລ້ວ ບັນລຸອະຣະຫັດຕະຜົນ ຈຶ່ງມີຢູ່

**ສັນໂຍຊະນະກະຖາ ຈົບ**

## ໔. ອິດທິກະຖາ (໔໐໖)

## ວ່າດ້ວຍລິດ

[໗໗໖] ສກ. ລິດຕາມທີ່ປະສົງຂອງພຣະພຸດທະເຈົ້າ ຫຼື ພຣະສາວົກມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ລິດຕາມທີ່ປະສົງວ່າ "ຂໍຕົ້ນໄມ້ຈົ່ງມີໃບເປັນນິດ" ຂອງພຣະພຸດທະເຈົ້າຫຼືພຣະສາວົກມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ລິດຕາມທີ່ປະສົງວ່າ "ຂໍຕົ້ນໄມ້ຈົ່ງແຕກດອກເປັນນິດ ຯລຯ ອອກຜົນເປັນນິດ ຯລຯ ຂໍສະຖານທີ່ແຫ່ງນີ້ຈົ່ງສະຫວ່າງເປັນນິດ ຯລຯ ຈົ່ງກະເສມເປັນນິດ ຯລຯ ຈົ່ງມີພິກສາຫາໄດ້ງ່າຍເປັນນິດ ຯລຯ ຈົ່ງມີຝົນດີເປັນນິດ" ຂອງພຣະພຸດທະເຈົ້າ ຫຼື ພຣະສາວົກມີຢູ່ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ລິດຕາມທີ່ປະສົງຂອງພຣະພຸດທະເຈົ້າ ຫຼື ພຣະສາວົກມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ລິດຕາມທີ່ປະສົງວ່າ "ຜັດສະທີ່ເກີດຂຶ້ນແລ້ວຢ່າດັບໄປ" ຂອງພຣະພຸດທະເຈົ້າ ຫຼື ພຣະສາວົກມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ລິດຕາມທີ່ປະສົງວ່າ "ເວທະນາ ຯລຯ ສັນຍາ ຯລຯ ເຈຕະນາ ຯລຯ ຈິດ ຯລຯ ສັດທາ ຯລຯ ວິຣິຍະ ຯລຯ ສະຕິ ຯລຯ ສະມາທິ ຯລຯ ປັນຍາທີ່ເກີດຂຶ້ນແລ້ວຢ່າດັບໄປ" ຂອງພຣະພຸດທະເຈົ້າ ຫຼືພຣະສາວົກມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ລິດຕາມທີ່ປະສົງຂອງພຣະພຸດທະເຈົ້າຫຼືພຣະສາວົກມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ລິດຕາມທີ່ປະສົງວ່າ "ຮູບຈົ່ງເປັນຂອງທ່ຽງ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານຈົ່ງເປັນຂອງທ່ຽງ" ຂອງພຣະພຸດທະເຈົ້າ ຫຼື ພຣະສາວົກມີຢູ່ ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ລິດຕາມທີ່ປະສົງຂອງພຣະພຸດທະເຈົ້າ ຫຼື ຂອງພຣະສາວົກມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ລິດຕາມທີ່ປະສົງວ່າ "ສັດທັງຫຼາຍຜູ້ມີຄວາມເກີດເປັນທຳມະດາຢ່າໄດ້ເກີດເລີຍ ຯລຯ ສັດທັງຫຼາຍຜູ້ມີຄວາມແກ່ເປັນທຳມະດາຢ່າໄດ້ແກ່ເລີຍ ຯລຯ ສັດທັງຫຼາຍຜູ້ມີຄວາມເຈັບເປັນທຳມະດາຢ່າໄດ້ເຈັບເລີຍ ຯລຯ ສັດທັງຫຼາຍຜູ້ມີຄວາມຕາຍເປັນທຳມະດາຢ່າໄດ້ຕາຍເລີຍ" ຂອງພຣະພຸດທະເຈົ້າຫຼືພຣະສາວົກມີຢູ່ແມ່ນບໍ?

ປຣ. ບໍ່ຄວນຍອມຮັບແນວນັ້ນ ຯລຯ

[໙໙໔] ປຣ. ທ່ານບໍ່ຍອມຮັບວ່າ "ລິດຕາມທີ່ປະສົງຂອງພຣະພຸດທະເຈົ້າຫຼືພຣະສາວົກມີຢູ່" ແມ່ນບໍ?

ສກ. ແມ່ນ

ປຣ. ທ່ານພຣະປິລິນທະວັດສະໄດ້ອະທິຖານຜາສາດຂອງພຣະເຈົ້າແຜ່ນດິນມະຄົດ ຜູ້ເປັນຈອມທັບ ພຣະນາມວ່າພິມພິສານວ່າ "ຈົ່ງເປັນຄຳ" ແລະຜາສາດກໍໄດ້ກາຍເປັນຄຳໄປຈິງບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກທ່ານພຣະປິລິນທະວັດສະໄດ້ອະທິຖານຜາສາດ ຂອງພຣະເຈົ້າແຜ່ນດິນມະຄົດຜູ້ເປັນຈອມທັບ ພຣະນາມວ່າພິມພິສານວ່າ "ຈົ່ງເປັນຄຳ" ແລະຜາສາດນັ້ນກໍໄດ້ກາຍເປັນຄຳໄປຈິງ ໆ ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ລິດທີ່ເປັນເຫດໃຫ້ສຳເລັດໄດ້ຕາມຄວາມປະສົງຂອງພຣະພຸດທະເຈົ້າ ຫຼື ພຣະສາວົກມີຢູ່"

**ອິດທິກະຖາ ຈົບ**

# ໕. ພຸດທະກະຖາ (໔໐໔)
## ວ່າດ້ວຍພຣະພຸດທະເຈົ້າ

[໗໗໕] ສກ. ພຣະພຸດທະເຈົ້າກັບພຣະພຸດທະເຈົ້າ ດ້ວຍກັນຍັງມີຄວາມຍິ່ງຄວາມຢ່ອນກວ່າກັນແມ່ນບໍ?

ປຣ. ແມ່ນ

ສກ. ໂດຍສະຕິປັດຖານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ໂດຍສຳມັບປະທານ ຯລຯ ໂດຍອິດທິບາດ ຯລຯ ໂດຍອິນຊີ ຯລຯ ໂດຍພະລະ ຯລຯ ໂດຍໂພດຊົງ ຯລຯ ໂດຍຄວາມຊຳນານ ຯລຯ ໂດຍສັບພັນຍຸຕະຍານທັດສະນະແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

**ພຸດທະກະຖາ ຈົບ**

# ໖. ສັບພະທິສາກະຖາ (໔໐໕)
## ວ່າດ້ວຍພຣະພຸດທະເຈົ້າປະທັບຢູ່ທົ່ວທຸກທິດ

[໗໗໖] ສກ. ພຣະພຸດທະເຈົ້າປະທັບຢູ່ໃນທິດທັງປວງແມ່ນບໍ?

ປຣ. ແມ່ນ

ສກ. ປະທັບຢູ່ໃນທິດຕາເວັນອອກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ປະທັບຢູ່ໃນທິດຕາເວັນອອກແມ່ນບໍ?

ປຣ. ແມ່ນ

ສກ. ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນຊົງພຣະນາມວ່າແນວໃດ ມີພຣະຊາດອັນໃດ ມີພຣະໂຄດອັນໃດ? ພຣະບິດາແລະພຣະມານດາຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນມີພຣະນາມວ່າແນວໃດ ຄູ່ພຣະອັກຄະຣະສາວົກຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນມີນາມວ່າແນວໃດ ອຸປັດຖາກຂອງພຣະຜູ້ມີພຣະພາກເຈົ້ານັ້ນມີນາມວ່າແນວໃດ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ງຊົງຈີວອນແນວໃດ ຊົງບາດແນວໃດ ປະທັບຢູ່ໃນບ້ານ ນິຄົມ ນະຄອນ ຣັດ ຫຼື ຊົນນະບົດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະພຸດທະເຈົ້າປະທັບຢູ່ໃນທິດໃຕ້ ຯລຯ ທິດຕາເວັນຕົກ ຯລຯ ທິດເໜືອ ຯລຯ ທິດເບື້ອງລ່າງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ປະທັບຢູ່ໃນທິດເບື້ອງລ່າງແມ່ນບໍ?

ປຣ. ແມ່ນ

ສກ. ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນຊົງພຣະນາມວ່າແນວໃດ ฯລฯ ປະທັບຢູ່ໃນຊິນນະບົດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ປະທັບຢູ່ໃນທິດເບື້ອງເທິງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ປະທັບຢູ່ໃນທິດເບື້ອງເທິງແມ່ນບໍ?

ປຣ. ແມ່ນ

ສກ. ປະທັບຢູ່ໃນຊັ້ນຈາຕຸມະຫາຣາດ ฯລฯ ຊັ້ນຕາວະຕິງສາ ฯລฯ ຊັ້ນຍາມາ ฯລฯ ຊັ້ນດຸສິດ ฯລฯ ຊັ້ນນິມມານະຣະດີ ฯລฯ ຊັ້ນປະຣະນິມມິຕະວະສະວັດດີ ฯລฯ ຊັ້ນພົມມະໂລກແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

**ສັບພະທິສາກະຖາ ຈົບ**

## ກ. ທຳມະກະຖາ (໔໐໖)

## ວ່າດ້ວຍສະພາວະທຳ

[໗໗໘] ສກ. ສະພາວະທຳທັງປວງເປັນສະພາວະທີ່ແນ່ນອນແມ່ນບໍ?

ປຣ. ແມ່ນ

ສກ. ເປັນສະພາວະທີ່ຜິດແລະແນ່ນອນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ເປັນສະພາວະທີ່ຖືກແລະແນ່ນອນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ກອງ (ແຫ່ງສະພາວະທຳ) ທີ່ບໍ່ແນ່ນອນບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ກອງ (ແຫ່ງສະພາວະທຳ) ທີ່ບໍ່ແນ່ນອນມີຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກກອງ (ແຫ່ງສະພາວະທຳ) ທີ່ບໍ່ແນ່ນອນມີຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ສະພາວະທຳທັງປວງເປັນສະພາວະທີ່ແນ່ນອນ"

ສກ. ສະພາວະທຳທັງປວງເປັນສະພາວະທີ່ແນ່ນອນແມ່ນບໍ?

ປຣ. ແມ່ນ

ສກ. ກອງ (ແຫ່ງສະພາວະທຳ) ພຣະຜູ້ມີພຣະພາກເຈົ້າຕັດໄວ້ ໓ ຢ່າງ ຄື (໑) ກອງທີ່ຜິດ ແລະແນ່ນອນ (໒) ກອງທີ່ຖືກແລະແນ່ນອນ (໓) ກອງທີ່ບໍ່ແນ່ນອນ ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກກອງ (ແຫ່ງສະພາວະທຳ) ພຣະຜູ້ມີພຣະພາກເຈົ້າຕັດໄວ້ ໓ ຢ່າງ ຄື (໑) ກອງທີ່ຜິດແລະແນ່ນອນ (໒) ກອງທີ່ຖືກແລະແນ່ນອນ (໓) ກອງທີ່ບໍ່ແນ່ນອນ ທ່ານກໍບໍ່ຄວນຍອມຮັບວ່າ "ສະພາວະທຳທັງປວງເປັນສະພາວະທີ່ແນ່ນອນ"

ສກ. ຮູບເປັນສະພາວະທີ່ແນ່ນອນ ຍ້ອນມີສະພາວະເປັນຮູບແມ່ນບໍ?

ປຣ. ແມ່ນ

ສກ. ເປັນສະພາວະທີ່ຜິດແລະແນ່ນອນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເປັນສະພາວະທີ່ຖືກແລະແນ່ນອນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານ ເປັນສະພາວະທີ່ແນ່ນອນ ຍ້ອນມີສະພາວະເປັນວິນຍານແມ່ນບໍ?

ປຣ. ແມ່ນ

ສກ. ເປັນສະພາວະທີ່ຜິດແລະແນ່ນອນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເປັນສະພາວະທີ່ຖືກແລະແນ່ນອນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໙໙໙] ປຣ. ທ່ານບໍ່ຍອມຮັບວ່າ "ຮູບເປັນສະພາວະທີ່ແນ່ນອນ ຍ້ອນມີສະພາວະເປັນຮູບ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານເປັນສະພາວະທີ່ແນ່ນອນຍ້ອນມີສະພາວະເປັນວິນຍານ" ແມ່ນບໍ?

ສກ. ແມ່ນ

ປຣ. ຮູບເປັນເວທະນາ ຯລຯ ເປັນສັນຍາ ຯລຯ ເປັນສັງຂານ ຯລຯ ເປັນວິນຍານ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານເປັນຮູບ ຯລຯ ເປັນເວທະນາ ຯລຯ ເປັນສັນຍາ ຯລຯ ເປັນສັງຂານແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ດັ່ງນັ້ນ ຮູບຈຶ່ງເປັນສະພາວະທີ່ແນ່ນອນໂດຍອັດຖະວ່າແປຜັນໄປ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານ ເປັນສະພາວະທີ່ແນ່ນອນ ຍ້ອນມີສະພາວະເປັນວິນຍານ

**ທຳມະກະຖາ ຈົບ**

# ໗. ກຳມະກະຖາ (໘໐ກ)
## ວ່າດ້ວຍກຳ

[໗໗໙] ສກ. ກຳທັງປວງເປັນສະພາວະທີ່ແນ່ນອນແມ່ນບໍ?

ປຣ. ແມ່ນ

ສກ. ເປັນສະພາວະທີ່ຜິດແລະແນ່ນອນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເປັນສະພາວະທີ່ຖືກແລະແນ່ນອນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກອງ (ແຫ່ງສະພາວະທຳ) ທີ່ບໍ່ແນ່ນອນບໍ່ມີແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ກອງ (ແຫ່ງສະພາວະທຳ) ທີ່ບໍ່ແນ່ນອນມີຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກກອງ (ແຫ່ງສະພາວະທຳ) ທີ່ບໍ່ແນ່ນອນມີຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ກຳທັງປວງເປັນສະພາວະທີ່ແນ່ນອນ"

ສກ. ກຳທັງປວງເປັນສະພາວະທີ່ແນ່ນອນແມ່ນບໍ?

ປຣ. ແມ່ນ

ສກ. ກອງ (ແຫ່ງສະພາວະທຳ) ພຣະຜູ້ມີພຣະພາກເຈົ້າຕັດໄວ້ ໓ ຢ່າງ ຄື (໑) ກອງທີ່ຜິດແລະແນ່ນອນ (໒) ກອງທີ່ຖືກແລະແນ່ນອນ (໓) ກອງທີ່ບໍ່ແນ່ນອນ ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກກອງ (ແຫ່ງສະພາວະທຳ) ພຣະຜູ້ມີພຣະພາກເຈົ້າຕັດກອງໄວ້ ໓ ຢ່າງ ຄື (໑) ກອງທີ່ຜິດແລະແນ່ນອນ (໒) ກອງທີ່ຖືກແລະແນ່ນອນ (໓) ກອງທີ່ບໍ່ແນ່ນອນ ທ່ານກໍບໍ່ຄວນຍອມຮັບວ່າ "ກຳທັງປວງເປັນສະພາວະທີ່ແນ່ນອນ"

[໗໙໐] ສກ. ທິດຖະທຳມະເວທະນີຍະກຳເປັນສະພາວະທີ່ແນ່ນອນໂດຍອັດຖະວ່າເປັນກຳອັນບຸກຄົນເພິ່ງສະເຫວີຍໃນປັດຈຸບັນແມ່ນບໍ?

ປຣ. ແມ່ນ

ສກ. ທິດຖະທຳມະເວທະນີຍະກຳນັ້ນເປັນສະພາວະທີ່ຜິດແລະແນ່ນອນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເປັນສະພາວະທີ່ຖືກແລະແນ່ນອນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອຸບປັດຊະເວທະນີຍະກຳ ຯລຯ ອຸປະຣາປະຣິຍະເວທະນີຍະກຳ ເປັນສະພາວະທີ່ແນ່ນອນ ໂດຍອັດຖະວ່າ ເປັນກຳອັນບຸກຄົນເພິ່ງສະເຫວີຍໃນອັດຕະພາບຕໍ່ ໆ ໄປແມ່ນບໍ?

ປຣ. ແມ່ນ

ສກ. ອຸປະຣາປະຣິຍະເວທະນີຍະກຳນັ້ນເປັນສະພາວະທີ່ຜິດ ແລະໃຫ້ຜົນແນ່ນອນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ເປັນສະພາວະທີ່ຖືກແລະໃຫ້ຜົນແນ່ນອນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໙໑] ປຣ. ທ່ານບໍ່ຍອມຮັບວ່າ "ທິດຖະທຳມະເວທະນີຍະກຳເປັນສະພາວະທີ່ແນ່ນອນ ໂດຍອັດຖະວ່າເປັນກຳອັນບຸກຄົນເພິ່ງສະເຫວີຍໃນປັດຈຸບັນ ອຸບປັດຊະເວທະນີຍະກຳ ຯລຯ ອຸປະຣາປະຣິຍະເວທະນີຍະກຳເປັນສະພາວະທີ່ແນ່ນອນ ໂດຍອັດຖະວ່າເປັນກຳອັນບຸກຄົນເພິ່ງສະເຫວີຍໃນອັດຕະພາບຕໍ່ ໆ ໄປ" ແມ່ນບໍ?

ສກ. ແມ່ນ

ປຣ. ທິດຖະທຳມະເວທະນີຍະກຳເປັນອຸບປັດຊະເວທະນີຍະກຳ ເປັນອະປາປະຣິຍະເວທະນີຍະກຳ ຯລຯ ອຸບປັດຊະເວທະນີຍະກຳເປັນທິດຖະທຳມະເວທະນີຍະກຳ ເປັນອະປາປະຣິຍະເວທະນີຍະກຳ ຯລຯ ອຸປະຣາປະຣິຍະເວທະນີຍະກຳເປັນທິດຖະທຳມະເວທະນີຍະກຳ ເປັນອຸບປັດຊະເວທະນີຍະກຳແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ

ປຣ. ດັ່ງນັ້ນ ທິດຖະທຳມະເວທະນີຍະກຳຈຶ່ງເປັນສະພາວະທີ່ແນ່ນອນ ໂດຍອັດຖະວ່າເປັນກຳອັນບຸກຄົນເພິ່ງສະເຫວີຍໃນປັດຈຸບັນ ອຸບປັດຊະເວທະນີຍະກຳ ຯລຯ ອຸປະຣາປະຣິຍະເວທະນີຍະກຳເປັນສະພາວະທີ່ແນ່ນອນ ໂດຍອັດຖະວ່າເປັນກຳອັນບຸກຄົນເພິ່ງສະເຫວີຍໃນອັດຕະພາບຕໍ່ ໆ ໄປ

**ກຳມະກະຖາ ຈົບ**

**ເອກະວິສະຕິມະວັກ ຈົບ**

## ລວມກະຖາທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ສາທະນະກະຖາ | ໖. ອະວິວິດຕະກະຖາ |
| ໒. ສັນໂຍຊະນະກະຖາ | ໔. ອິດທິກະຖາ |
| ໕. ພຸດທະກະຖາ | ໖. ສັບພະທິສາກະຖາ |
| ໗. ທຳມະກະຖາ | ໘. ກຳມະກະຖາ |

# ໒໔. ພາວິສະຕິນະວັກ

## ໑. ປະຣິນິບພານະກະຖາ (໒໐໗)

## ວ່າດ້ວຍປະຣິນິບພານ

[໗໒໔] ສກ. ພຣະອະຣະຫັນລະສັງໂຍດບາງຢ່າງ ຍັງບໍ່ໄດ້ແລ້ວປະຣິນິບພານມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນລະສັກກາຍະທິດຖິ ຯລຯ ອະໂນດຕັບປະບາງຢ່າງຍັງບໍ່ໄດ້ແລ້ວປະຣິນິບພານມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນລະສັງໂຍດບາງຢ່າງຍັງບໍ່ໄດ້ແລ້ວປະຣິນິບພານມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຍັງມີຣາຄະ ຯລຯ ຍັງມີກິເລດຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນບໍ່ມີຣາຄະ ຯລຯ ບໍ່ມີກິເລດບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະອະຣະຫັນບໍ່ມີຣາຄະ ຯລຯ ບໍ່ມີກິເລດ ທ່ານກໍບໍ່ຄວນຍອມຮັບວ່າ "ພຣະອະຣະຫັນລະສັງໂຍດບາງຢ່າງຍັງບໍ່ໄດ້ແລ້ວປະຣິນິບພານມີຢູ່"

[໗໒໕] ປຣ. ທ່ານບໍ່ຍອມຮັບວ່າ "ພຣະອະຣະຫັນລະສັງໂຍດບາງຢ່າງຍັງບໍ່ໄດ້ແລ້ວປະຣິນິບພານມີຢູ່" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະອະຣະຫັນຮູ້ພຸດທະຂອບເຂດໄດ້ທັງໝົດແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ດັ່ງນັ້ນ ພຣະອະຣະຫັນລະສັງໂຍດບາງຢ່າງຍັງບໍ່ໄດ້ແລ້ວ ປະຣິນິບພານ ຈຶ່ງມີຢູ່

**ປະຣິນິບພານະກະຖາ ຈົບ**

## ໒. ກຸສະລະຈິດຕະກະຖາ (໒໐໘)

## ວ່າດ້ວຍກຸສົນຈິດ

[໗໒໒] ສກ. ພຣະອະຣະຫັນ ມີຈິດເປັນກຸສົນປະຣິນິບພານແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນຍັງສ້າງສົມປຸນຍາພິສັງຂານ ຯລຯ ອາເນນຊາພິສັງຂານ ຯລຯ ເຮັດກຳທີ່ເປັນໄປເພື່ອຄະຕິ ຯລຯ ເພື່ອພົບ ຯລຯ ເພື່ອຄວາມເປັນຜູ້ມີອຳນາດ ຯລຯ ເພື່ອຄວາມເປັນໃຫຍ່ ຯລຯ ເພື່ອມີສົມບັດຫຼາຍ ຯລຯ ເພື່ອມີບໍລິວານຫຼາຍ ຯລຯ ເພື່ອຄວາມງາມໃນໝູ່ເທບ ຯລຯ ເພື່ອຄວາມງາມໃນມະນຸດແລ້ວປະຣິນິບພານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນມີຈິດເປັນກຸສົນປະຣິນິບພານແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນສັ່ງສົມຢູ່ ບໍ່ສັ່ງສົມຢູ່ ຯລຯ ລະຢູ່ ຍຶດໝັ້ນຢູ່ ຯລຯ ກຳຈັດຢູ່ ກໍ່ຢູ່ ຯລຯ ທຳລາຍຢູ່ ປັບປຸງຢູ່ ປະຣິນິບພານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະອະຣະຫັນສັ່ງສົມຢູ່ກໍບໍ່ແມ່ນ ບໍ່ສັ່ງສົມຢູ່ກໍບໍ່ແມ່ນ ແຕ່ເປັນຜູ້ບໍ່ສັ່ງສົມແລ້ວດຳລົງຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະອະຣະຫັນສັ່ງສົມຢູ່ກໍບໍ່ແມ່ນ ບໍ່ສັ່ງສົມຢູ່ກໍບໍ່ແມ່ນ ແຕ່ເປັນຜູ້ບໍ່ສັ່ງສົມແລ້ວດຳລົງຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ພຣະອະຣະຫັນມີຈິດເປັນກຸສົນປະຣິນິບພານ"

ສກ. ພຣະອະຣະຫັນລະຢູ່ກໍບໍ່ແມ່ນ ຍຶດໝັ້ນຢູ່ກໍບໍ່ແມ່ນ ແຕ່ເປັນຜູ້ລະແລ້ວດຳລົງຢູ່ ກຳຈັດຢູ່ກໍບໍ່ແມ່ນ ກໍ່ຢູ່ກໍບໍ່ແມ່ນ ແຕ່ເປັນຜູ້ກຳຈັດແລ້ວດຳລົງຢູ່ ທຳລາຍຢູ່ກໍບໍ່ແມ່ນ ປັບປຸງຢູ່ກໍບໍ່ແມ່ນ ແຕ່ເປັນຜູ້ທຳລາຍແລ້ວດຳລົງຢູ່ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະອະຣະຫັນທຳລາຍຢູ່ກໍບໍ່ແມ່ນ ປັບປຸງຢູ່ກໍບໍ່ແມ່ນ ແຕ່ເປັນຜູ້ທຳລາຍແລ້ວດຳລົງຢູ່ ທ່ານກໍບໍ່ຄວນຍອມຮັບວ່າ "ພຣະອະຣະຫັນມີຈິດເປັນກຸສົນປະຣິນິບພານ"

[໗໙໕] ປຣ. ທ່ານບໍ່ຍອມຮັບວ່າ "ພຣະອະຣະຫັນມີຈິດເປັນກຸສົນປະຣິນິບພານ" ແມ່ນບໍ?

ສກ. ແມ່ນ

ປຣ. ພຣະອະຣະຫັນມີສະຕິຕັ້ງໝັ້ນ ມີສະຕິສຳປະຊັນຍະປະຣິນິບພານບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກພຣະອະຣະຫັນມີສະຕິຕັ້ງໝັ້ນ ມີສະຕິສຳປະຊັນຍະປະຣິນິບພານ ດັ່ງນັ້ນທ່ານຈຶ່ງຄວນຍອມຮັບວ່າ "ພຣະອະຣະຫັນມີຈິດເປັນກຸສົນປະຣິນິບພານ"

**ກຸສະລະຈິດຕະກະຖາ ຈົບ**

# ៦. ອາເນນຊະກະຖາ (໔໑໐)

## ວ່າດ້ວຍອາເນນຊະສະມາທິ (ຈະຕຸດຖະຊານຈິດ)

[໗໙໖] ສກ. ພຣະອະຣະຫັນດຳລົງຢູ່ໃນອາເນນຊະສະມາທິ ປະຣິນິບພານແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນດຳລົງຢູ່ໃນປົກກະຕິຈິດ ປະຣິນິບພານບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະອະຣະຫັນດຳລົງຢູ່ໃນປົກກະຕິຈິດປະຣິນິບພານ ທ່ານກໍບໍ່ຄວນຍອມຮັບວ່າ "ພຣະອະຣະຫັນດຳລົງຢູ່ໃນອາເນນຊະສະມາທິ ປະຣິນິບພານ"

ສກ. ພຣະອະຣະຫັນດຳລົງຢູ່ໃນອາເນນຊະສະມາທິ ປະຣິນິບພານແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນດຳລົງຢູ່ໃນກິຣິຍາຈິດ ປະຣິນິບພານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ພຣະອະຣະຫັນດຳລົງຢູ່ໃນວິປາກະຈິດ ປະຣິນິບພານບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະອະຣະຫັນດຳລົງຢູ່ໃນວິປາກະຈິດ ປະຣິນິບພານ ທ່ານກໍບໍ່ຄວນຍອມຮັບວ່າ "ພຣະອະຣະຫັນດຳລົງຢູ່ໃນອາເນນຊະສະມາທິ ປະຣິນິບພານ"

ສກ. ພຣະອະຣະຫັນດຳລົງຢູ່ໃນອາເນນຊະສະມາທິ ປະຣິນິບພານແມ່ນບໍ?

ປຣ. ແມ່ນ

ສກ. ພຣະອະຣະຫັນດຳລົງຢູ່ໃນອັບພະຍາກະຕະກິຣິຍາຈິດ ປະຣິນິບພານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ພຣະອະຣະຫັນດຳລົງຢູ່ໃນອັບພະຍາກະຕະວິປາກະຈິດ ປະຣິນິບພານບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະອະຣະຫັນດຳລົງຢູ່ໃນອັບພະຍາກະຕະວິປາກະຈິດ ປະຣິນິບພານ ທ່ານກໍບໍ່ຄວນຍອມຮັບວ່າ "ພຣະອະຣະຫັນດຳລົງຢູ່ໃນອາເນນຊະສະມາທິ ປະຣິນິບພານ"

ສກ. ພຣະອະຣະຫັນດຳລົງຢູ່ໃນອາເນນຊະສະມາທິ ປະຣິນິບພານແມ່ນບໍ?

ປຣ. ແມ່ນ

ສກ. ພຣະຜູ້ມີພຣະພາກເຈົ້າຊົງອອກຈາກຈະຕຸດຖະຊານແລ້ວ ປະຣິນິບພານໃນລຳດັບຕິດຕໍ່ກັນບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກພຣະຜູ້ມີພຣະພາກເຈົ້າຊົງອອກຈາກຈະຕຸດຖະຊານແລ້ວ ປະຣິນິບພານໃນລຳດັບຕິດຕໍ່ກັນ ທ່ານກໍບໍ່ຄວນຍອມຮັບວ່າ "ພຣະອະຣະຫັນດຳລົງຢູ່ໃນອາເນນຊະສະມາທິປະຣິນິບພານ"

**ອາເນນຊະກະຖາ ຈົບ**

## ໔. ທຳມາພິສະມະຍະກະຖາ (໔໑໑)

## ວ່າດ້ວຍການບັນລຸທຳ

[໗໔໗] ສກ. ການບັນລຸທຳຂອງສັດຜູ້ຢູ່ໃນທ້ອງມີໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ການສະແດງທຳ ການຟັງທຳ ການສົນທະນາທຳ ການສອບຖາມ ການສະມາທານສີນ ຄວາມຄຸ້ມຄອງທະວານໃນອິນຊີທັງຫຼາຍ ຄວາມເປັນຜູ້ຮູ້ຈັກປະມານໃນໂພຊະນະ ການໝັ່ນປະກອບຄວາມພຽນເປັນເຄື່ອງຕື່ນທັງໃນປະຖົມຍາມ ແລະປັດສິມຍາມແຫ່ງຣາຕີ ຂອງສັດຜູ້ຢູ່ໃນທ້ອງມີໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ການສະແດງທຳ ການຟັງທຳ ຯລຯ ການໝັ່ນປະກອບຄວາມພຽນເປັນເຄື່ອງຕື່ນທັງໃນປະຖົມຍາມ ແລະປັດສິມຍາມແຫ່ງຣາຕີຂອງສັດຜູ້ຢູ່ໃນທ້ອງບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ຫາກການສະແດງທຳ ການຟັງທຳ ຯລຯ ການໝັ່ນປະກອບຄວາມພຽນເປັນເຄື່ອງຕື່ນທັງໃນປະຖົມຍາມ ແລະປັດສິມຍາມແຫ່ງຣາຕີຂອງສັດຜູ້ຢູ່ໃນທ້ອງບໍ່ມີ ທ່ານກໍບໍ່ຄວນຍອມຮັບວ່າ "ການບັນລຸທຳຂອງສັດຜູ້ຢູ່ໃນທ້ອງມີໄດ້"

ສກ. ການບັນລຸທຳສັດຜູ້ຢູ່ໃນທ້ອງມີໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ປັດໄຈເພື່ອຄວາມເກີດຂຶ້ນແຫ່ງສຳມາທິດຖິມີ ໒ ຢ່າງ ຄື (໑) ປະຣະໂຕໂຄສະ (ຄຳແນະນຳຈາກຜູ້ອື່ນ) (໒) ໂຍນິໂສມະນະສິການ (ການໃຊ້ຄວາມຄິດຖືກວິທີ) ບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກປັດໄຈເພື່ອຄວາມເກີດຂຶ້ນແຫ່ງສຳມາທິດຖິມີ ໒ ຢ່າງ ຄື (໑) ປະຣະໂຕໂຄສະ (໒) ໂຍນິໂສມະນະສິການ ທ່ານກໍບໍ່ຄວນຍອມຮັບວ່າ "ການບັນລຸທຳຂອງສັດຜູ້ຢູ່ໃນທ້ອງມີໄດ້"

ສກ. ການບັນລຸທຳຂອງສັດຜູ້ຢູ່ໃນທ້ອງມີໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ການບັນລຸທຳຂອງບຸກຄົນຜູ້ຫຼັບ ຜູ້ຜະໝາດ ຜູ້ມີສະຕິຫຼົງລືມ ຜູ້ບໍ່ມີສຳປະຊັນຍະມີໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

**ທຳມາພິສະມະຍະກະຖາ ຈົບ**

# ໕-ກ. ຕິດໂສປິກະຖາ (໒໑໒-໒໑໔)

## ວ່າດ້ວຍເລື້ອງການບັນລຸອີກ ໓ ເລື້ອງ

[໗໙໗] ສກ. ການບັນລຸອະຣະຫັດຕະຜົນຂອງສັດຜູ້ຢູ່ໃນທ້ອງມີໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ການບັນລຸອະຣະຫັດຕະຜົນຂອງບຸກຄົນຜູ້ຫຼັບ ຜູ້ຜະໝາດ ຜູ້ມີສະຕິຫຼົງລືມ ຜູ້ບໍ່ມີສຳປະຊັນຍະມີໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໗໙໙] ສກ. ການບັນລຸທຳຂອງບຸກຄົນຜູ້ຝັນມີໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ການບັນລຸທຳຂອງບຸກຄົນຜູ້ຫຼັບ ຜູ້ຜະໝາດ ຜູ້ມີສະຕິຫຼົງລືມ ຜູ້ບໍ່ມີສຳປະຊັນຍະມີໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໙໐໐] ສກ. ການບັນລຸອະຣະຫັດຕະຜົນຂອງບຸກຄົນຜູ້ຝັນມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ການບັນລຸອະຣະຫັດຕະຜົນຂອງບຸກຄົນຜູ້ຫຼັບ ຜູ້ຜະໝາດ ຜູ້ມີສະຕິຫຼົງລືມ ຜູ້ບໍ່ມີສຳປະຊັນຍະມີໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

**ຕິດໂສປິກະຖາ ຈົບ**

# ໗. ອັບພະຍາກະຕະກະຖາ (໒໑໕)

## ວ່າດ້ວຍອັບພະຍາກະຕະຈິດ

[໙໐໑] ສກ. ຈິດຂອງບຸກຄົນຜູ້ຝັນທຸກດວງເປັນອັບພະຍາກະຕະແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນອາດຈະຂ້າສັດໄດ້ດ້ວຍຄວາມຝັນແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນອາດຈະຂ້າສັດໄດ້ດ້ວຍຄວາມຝັນ ທ່ານກໍບໍ່ຄວນຍອມຮັບວ່າ "ຈິດຂອງບຸກຄົນຜູ້ຝັນທຸກດວງເປັນອັບພະຍາກະຕະ"

ສກ. ບຸກຄົນອາດຈະລັກຊັບໄດ້ດ້ວຍຄວາມຝັນ ຯລຯ ເວົ້າຕົວະ ຯລຯ ເວົ້າສັບສໍ່ ຯລຯ ເວົ້າຄຳຫຍາບ ຯລຯ ເວົ້າໂລເລ ຯລຯ ຕັດປ່ອງຍ່ອງເບົາ ຯລຯ ປຸ້ນສະດົມ ຯລຯ ປຸ້ນເຮືອນຫຼັງດຽວ ຯລຯ ດັກປຸ້ນໃນທາງປ່ຽວ ຯລຯ ຜິດພັນລະຍາຂອງຜູ້ອື່ນ ຯລຯ ປຸ້ນຊາວບ້ານ ຯລຯ ປຸ້ນຊາວນິຄົມ ຯລຯ ເສບເມຖຸນທຳໄດ້ດ້ວຍຄວາມຝັນ ຯລຯ ອະສຸຈິຂອງຜູ້ຝັນອາດຈະເຄື່ອນໄດ້ ຯລຯ ອາດຈະໃຫ້ທານ ຯລຯ ຈີວອນ ຯລຯ ບິນທະບາດ ຯລຯ ເສນາສະນະ ຯລຯ ຄິລານະປັດໄຈເພສັດບໍຣິຂານ ຯລຯ ຂອງຂົບຫຍ້ຳ ຯລຯ ຂອງກິນ ຯລຯ ນ້ຳດື່ມ ຯລຯ ອາດຈະໄຫວ້ພຣະເຈດີ ຯລຯ ອາດຈະຍົກດອກໄມ້ ຯລຯ ຂອງຫອມ ຯລຯ ເຄື່ອງລູບທາຂຶ້ນໄວ້ເທິງພຣະເຈດີ ຯລຯ ອາດຈະກະທຳປະທັກຂິນພຣະເຈດີໄດ້ດ້ວຍຄວາມຝັນແມ່ນບໍ?

ປຣ. ແມ່ນ

ສກ. ຫາກບຸກຄົນອາດຈະກະທຳປະທັກຂິນພຣະເຈດີໄດ້ດ້ວຍຄວາມຝັນ ທ່ານກໍບໍ່ຄວນຍອມຮັບວ່າ "ຈິດຂອງບຸກຄົນຜູ້ຝັນທຸກດວງເປັນອັບພະຍາກະຕະ"

[໗໐໘] ປຣ. ທ່ານບໍ່ຍອມຮັບວ່າ "ຈິດຂອງບຸກຄົນຜູ້ຝັນທຸກດວງເປັນອັບພະຍາກະຕະ" ແມ່ນບໍ?

ສກ. ແມ່ນ

ປຣ. ຈິດຂອງບຸກຄົນຜູ້ຝັນ ພຣະຜູ້ມີພຣະພາກເຈົ້າຕັດວ່າ "ເປັນອັບໂພຫາຣິກ" ບໍ່ແມ່ນບໍ?

ສກ. ແມ່ນ

ປຣ. ຫາກຈິດຂອງບຸກຄົນຜູ້ຝັນ ພຣະຜູ້ມີພຣະພາກເຈົ້າຕັດວ່າ "ເປັນອັບໂພຫາຣິກ" ດັ່ງນັ້ນ ທ່ານຈຶ່ງຄວນຍອມຮັບວ່າ "ຈິດຂອງບຸກຄົນຜູ້ຝັນທຸກດວງເປັນອັບພະຍາກະຕະ"

**ອັບພະຍາກະຕະກະຖາ ຈົບ**

## ໗. ອາເສວະນະປັດຈະຍະຕາກະຖາ (໔໑໖)

## ວ່າດ້ວຍຄວາມເປັນອາເສວະນະປັດໄຈ

[໗໐໙] ສກ. ຄວາມເປັນອາເສວະນະປັດໄຈບາງຢ່າງບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ “ພິກຂຸທັງຫຼາຍ ປານາຕິບາດ (ການຂ້າສັດ) ທີ່ບຸກຄົນເສບ ຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມອຳນວຍຜົນໃຫ້ໄປເກີດໃນນະຮົກ ອຳນວຍຜົນໃຫ້ເກີດໃນກຳເນີດສັດເດຍຣັດສານ ອຳນວຍຜົນໃຫ້ໄປເກີດໃນພູມແຫ່ງເຜດ ວິບາກແຫ່ງປານາຕິບາດຢ່າງເບົາທີ່ສຸດ ຍ່ອມອຳນວຍຜົນໃຫ້ເປັນຜູ້ມີອາຍຸສັ້ນແກ່ຜູ້ເກີດເປັນມະນຸດ” ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ຄວາມເປັນອາເສວະນະປັດໄຈບາງຢ່າງຈຶ່ງມີຢູ່

ສກ. ຄວາມເປັນອາເສວະນະປັດໄຈບາງຢ່າງບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ “ພິກຂຸທັງຫຼາຍ ອະທິນນາທານ (ການລັກຊັບ) ທີ່ບຸກຄົນເສບ ຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມອຳນວຍຜົນໃຫ້ໄປເກີດໃນນະຮົກ ອຳນວຍຜົນໃຫ້ໄປເກີດໃນກຳເນີດສັດເດຍຣັດສານ ອຳນວຍຜົນໃຫ້ໄປເກີດໃນພູມແຫ່ງເຜດ ວິບາກແຫ່ງອະທິນນາທານຢ່າງເບົາທີ່ສຸດ ຍ່ອມອຳນວຍຜົນໃຫ້ເປັນຜູ້ເສື່ອມໂພຄະຊັບແກ່ຜູ້ເກີດເປັນມະນຸດ ຯລຯ ວິບາກແຫ່ງກາເມສຸມິດສາຈານ (ການປະພຶດຜິດໃນກາມ) ຢ່າງເບົາທີ່ສຸດ ຍ່ອມອຳນວຍຜົນໃຫ້ເປັນຜູ້ມີສັດຕູ ແລະເປັນຜູ້ມີເວນແກ່ຜູ້ເກີດເປັນມະນຸດ ຯລຯ ວິບາກແຫ່ງມຸສາວາທະ (ການເວົ້າຕົວະ) ຢ່າງເບົາທີ່ສຸດ ຍ່ອມອຳນວຍຜົນໃຫ້ຖືກກ່າວຕູ່ດ້ວຍຄຳບໍ່ຈິງແກ່ຜູ້ເກີດເປັນມະນຸດ ຯລຯ ວິບາກແຫ່ງປິສຸນາວາຈາ (ການເວົ້າສັບສໍ່) ຢ່າງເບົາທີ່ສຸດ ຍ່ອມອຳນວຍຜົນໃຫ້ແຕກຈາກມິດແກ່ຜູ້ເກີດເປັນມະນຸດ ຯລຯ ວິບາກແຫ່ງຜະຣຸສະວາຈາ (ການເວົ້າຫຍາບຄາຍ) ຢ່າງເບົາທີ່ສຸດ ຍ່ອມອຳນວຍຜົນໃຫ້ໄດ້ຟັງເລື້ອງທີ່ບໍ່ໜ້າຟັງແກ່ຜູ້ເກີດເປັນມະນຸດ ຯລຯ ວິບາກແຫ່ງສຳຜັບປະລາປະ (ການເວົ້າໂລເລ) ຢ່າງເບົາທີ່ສຸດ ຍ່ອມອຳນວຍຜົນໃຫ້ມີວາຈາທີ່ບໍ່ໜ້າເຊື່ອຖືແກ່ຜູ້ເກີດເປັນມະນຸດ ຯລຯ ການດື່ມສຸຣາເມໄຣທີ່ບຸກຄົນເສບ ຯລຯ ວິບາກແຫ່ງການດື່ມສຸຣາເມໄຣຢ່າງເບົາທີ່ສຸດ ຍ່ອມອຳນວຍຜົນໃຫ້ເປັນຜູ້ວິກົນຈະລິດແກ່ຜູ້ເກີດເປັນມະນຸດ” ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ຄວາມເປັນອາເສວະນະປັດໄຈບາງຢ່າງຈຶ່ງມີຢູ່

[໗໐໔] ສກ. ຄວາມເປັນອາເສວະນະປັດໄຈບາງຢ່າງບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ “ພິກຂຸທັງຫຼາຍ ມິດສາທິດຖິທີ່ບຸກຄົນເສບ ຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມອຳນວຍຜົນໃຫ້ໄປເກີດໃນນະຮົກ ອຳນວຍຜົນໃຫ້ໄປເກີດໃນກຳເນີດສັດເດຍຣັດສານ ອຳນວຍຜົນໃຫ້ໄປເກີດໃນພູມແຫ່ງເຜດ” ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ຄວາມເປັນອາເສວະນະປັດໄຈບາງຢ່າງຈຶ່ງມີຢູ່

ສກ. ຄວາມເປັນອາເສວະນະປັດໄຈບາງຢ່າງບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ມິດສາສັງກັບປະ ຯລຯ ມິດສາສະມາທິ ທີ່ບຸກຄົນເສບ ຈະເລີນ ເຮັດໃຫ້ຫຼາຍແລ້ວ ຯລຯ ຍ່ອມອຳນວຍຜົນໃຫ້ໄປເກີດໃນພູມແຫ່ງເຜດ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ຄວາມເປັນອາເສວະນະປັດໄຈບາງຢ່າງຈຶ່ງມີຢູ່

[໗໐໕] ສກ. ຄວາມເປັນອາເສວະນະປັດໄຈບາງຢ່າງບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ສຳມາທິດຖິທີ່ບຸກຄົນເສບ ຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມຢັ່ງລົງສູ່ອຳມະຕະ ມີອະມະຕະເປັນຈຸດມຸ້ງໝາຍ ມີອະມະຕະເປັນບ່ອນສຸດ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ຄວາມເປັນອາເສວະນະປັດໄຈບາງຢ່າງຈຶ່ງມີຢູ່

ສກ. ຄວາມເປັນອາເສວະນະປັດໄຈບາງຢ່າງບໍ່ມີແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ສຳມາສັງກັບປະທີ່ບຸກຄົນເສບ ຈະເລີນ ເຮັດໃຫ້ຫຼາຍແລ້ວ ຯລຯ ສຳມາສະມາທິທີ່ບຸກຄົນເສບຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມຢັ່ງລົງສູ່ອຳມະຕະ ມີອະມະຕະເປັນຈຸດມຸ້ງໝາຍ ມີອະມະຕະເປັນບ່ອນສຸດ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ຄວາມເປັນອາເສວະນະປັດໄຈບາງຢ່າງຈຶ່ງມີຢູ່

**ອາເສວະນະປັດຈະຍະຕາກະຖາ ຈົບ**

## ໑໐. ຂະນິກະກະຖາ (໔໑໗)

## ວ່າດ້ວຍສະພາວະທຳທັງປວງເປັນໄປຊົ່ວຂະນະຈິດໜຶ່ງ

[໗໐໖] ສກ. ສະພາວະທຳທັງປວງເປັນໄປຊົ່ວຂະນະຈິດໜຶ່ງແມ່ນບໍ?

ປຣ. ແມ່ນ

ສກ. ມະຫາປະຖະພີ ມະຫາສະມຸດ ພູເຂົາສິເນຣຸ ນ້ຳ ໄຟ ລົມ ຫຍ້າ ໄມ້ ແລະໄມ້ເຈົ້າປ່າ ລ້ວນແຕ່ດຳລົງຢູ່ໄດ້ໃນຈິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ສະພາວະທຳທັງປວງເປັນໄປຊົ່ວຂະນະຈິດໜຶ່ງແມ່ນບໍ?

ປຣ. ແມ່ນ

ສກ. ຈັກຂາຍະຕະນະເກີດພ້ອມກັບຈັກຂຸວິນຍານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ຈັກຂາຍະຕະນະເກີດພ້ອມກັບຈັກຂຸວິນຍານແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ວ່າ "ທ່ານພຣະສາຣີບຸດໄດ້ກ່າວໄວ້ດັ່ງນີ້ວ່າ "ທ່ານຜູ້ມີອາຍຸ ຈັກຂຸທີ່ເປັນອາຍະຕະນະພາຍໃນ ບໍ່ແຕກທຳລາຍ ຮູບທີ່ເປັນອາຍະຕະນະພາຍນອກບໍ່ມາສູ່ຄອງຈັກຂຸ ແລະຄວາມໃສ່ໃຈອັນເກີດຈາກຈັກຂຸ ແລະຮູບກໍບໍ່ມີ ວິນຍານສ່ວນທີ່ເກີດຈາກຈັກຂຸ ແລະຮູບນັ້ນກໍບໍ່ຜາກົດ ຈັກຂຸທີ່ເປັນອາຍະຕະນະພາຍໃນບໍ່ແຕກທຳລາຍ ຮູບທີ່ເປັນອາຍະຕະນະພາຍນອກມາສູ່ຄອງຈັກຂຸ ແຕ່ຄວາມໃສ່ໃຈອັນເກີດຈາກຈັກຂຸ ແລະຮູບນັ້ນບໍ່ມີວິນຍານສ່ວນທີ່ເກີດຈາກຈັກຂຸ ແລະຮູບນັ້ນກໍບໍ່ຜາກົດ ແຕ່ເມື່ອໃດ ຈັກຂຸທີ່ເປັນອາຍະຕະນະພາຍໃນບໍ່ແຕກທຳລາຍ ຮູບທີ່ເປັນອາຍະຕະນະພາຍນອກມາສູ່ຄອງຈັກຂຸ ແລະຄວາມໃສ່ໃຈອັນເກີດຈາກຈັກຂຸແລະຮູບນັ້ນກໍມີ ເມື່ອນັ້ນວິນຍານສ່ວນທີ່ເກີດຈາກຈັກຂຸ ແລະຮູບນັ້ນຍ່ອມຜາກົດ ດ້ວຍອາການແນວນີ້" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ຈັກຂາຍະຕະນະເກີດພ້ອມກັບຈັກຂຸວິນຍານ"

ສກ. ໂສຕາຍະຕະນະ ฯລฯ ຄານາຍະຕະນະ ฯລฯ ຊິວຫາຍະຕະນະ ฯລฯ ກາຍາຍະຕະນະເກີດພ້ອມກັບກາຍວິນຍານແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ฯລฯ

ສກ. ກາຍາຍະຕະນະເກີດພ້ອມກັບກາຍວິນຍານແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ວ່າ "ທ່ານພຣະສາຣີບຸດໄດ້ກ່າວໄວ້ດັ່ງນີ້ວ່າ "ທ່ານຜູ້ມີອາຍຸກາຍທີ່ເປັນອາຍະຕະນະພາຍໃນບໍ່ແຕກທຳລາຍ ໂຜດຖັບພະທີ່ເປັນອາຍະຕະນະພາຍນອກບໍ່ມາສູ່ຄອງກາຍແລະຄວາມໃສ່ໃຈອັນເກີດຈາກກາຍແລະໂຜດຖັບພະກໍບໍ່ມີ ฯລฯ ກາຍທີ່ເປັນອາຍະຕະນະພາຍໃນບໍ່ແຕກທຳລາຍ ໂຜດຖັບພະທີ່ເປັນອາຍະຕະນະພາຍນອກມາສູ່ຄອງກາຍ ແຕ່ຄວາມໃສ່ໃຈອັນເກີດຈາກກາຍ ແລະໂຜດຖັບພະບໍ່ມີ ฯລฯ ແຕ່ເມື່ອໃດ ກາຍທີ່ເປັນອາຍະຕະນະພາຍໃນບໍ່ແຕກທຳລາຍ ໂຜດຖັບພະທີ່ເປັນອາຍະຕະນະພາຍນອກມາສູ່ຄອງກາຍ ແລະໂຜດຖັບພະ ແລະ

ຄວາມໃສ່ໃຈອັນເກີດຈາກກາຍ ແລະໂຜດຖັບພະກໍມີ ເມື່ອນັ້ນ ວິນຍານສ່ວນທີ່ເກີດຈາກກາຍ ແລະໂຜດຖັບພະນັ້ນຍ່ອມຜາກົດ ດ້ວຍອາການແນວນີ້" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ດັ່ງນັ້ນ ທ່ານຈຶ່ງບໍ່ຄວນຍອມຮັບວ່າ "ກາຍາຍະຕະນະເກີດພ້ອມກັບກາຍວິນຍານ"

[໗໐໗] ປຣ. ທ່ານບໍ່ຍອມຮັບວ່າ "ສະພາວະທຳທັງປວງເປັນໄປຊົ່ວຂະນະຈິດໜຶ່ງ" ແມ່ນບໍ?

ສກ. ແມ່ນ

ປຣ. ສະພາວະທຳທັງປວງທ່ຽງ ຍັ່ງຍືນ ຄົງທີ່ ບໍ່ມີຄວາມແປຜັນໄປເປັນທຳມະດາແມ່ນບໍ?

ສກ. ບໍ່ຄວນກ່າວແນວນັ້ນ ຯລຯ

ປຣ. ດັ່ງນັ້ນ ສະພາວະທຳທັງປວງຈຶ່ງເປັນໄປຊົ່ວຂະນະຈິດໜຶ່ງ

**ຂະນິກະກະຖາ ຈົບ**

**ພາວິສະຕິມະວັກ ຈົບ**

## ລວມກະຖາທີ່ມີໃນວັກນີ້ ຄື

໑. ປະຣິນິບພານະກະຖາ
໒. ອາເນນຊະກະຖາ
໓-໔. ຕິດໂສປີກະຖາ
໕. ອາເສວະນະປັດຈະຍະຕາກະຖາ
໖. ກຸສະລະຈິດຕະກະຖາ
໘. ທຳມາພິສະມະຍະກະຖາ
໙. ອັບພະຍາກະຕະກະຖາ
໑໐. ຂະນິກະກະຖາ

# ໔໓. ເຕວີສະຕິມະວັກ

## ໑. ເອກາທິປະປາຍະກະຖາ (໔໑໙)

### ວ່າດ້ວຍຈຸດປະສົງແນວດຽວກັນ

[໙໐໙] ສກ. ບຸກຄົນເສບເມຖຸນທຳດ້ວຍຈຸດປະສົງແນວດຽວກັນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຜູ້ເສບເມຖຸນທຳບໍ່ຄວນເປັນສະມະນະ ບໍ່ຄວນເປັນພິກຂຸ ຄວນເປັນຜູ້ມີມູນຂາດແລ້ວ ຄວນເປັນປາຣາຊິກ ດ້ວຍຈຸດປະສົງແນວດຽວກັນແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ບຸກຄົນເສບເມຖຸນທຳດ້ວຍຈຸດປະສົງແນວດຽວກັນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ບຸກຄົນຂ້າສັດ ລັກຊັບ ເວົ້າຕົວະ ເວົ້າສັບສົ່ ເວົ້າຄຳຫຍາບ ເວົ້າໂລເລ ຕັດປ່ອງຍ່ອງເບົາ ປຸ້ນສະດົມ ປຸ້ນເຮືອນຫຼັງດຽວ ດັກປຸ້ນໃນທາງປ່ຽວ ຜິດເມຍຂອງຜູ້ອື່ນ ປຸ້ນຊາວບ້ານ ປຸ້ນຊາວນິຄົມ ດ້ວຍຈຸດປະສົງແນວດຽວກັນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

**ເອກາທິປະປາຍະກະຖາ ຈົບ**

## ໔. ອະຣະຫັນຕະວັນນະກະຖາ (໔໑໗)

### ວ່າດ້ວຍເພດຂອງພຣະອະຣະຫັນ

[໙໐໗] ສກ. ພວກອະມະນຸດເສບເມຖຸນທຳໂດຍເພດຂອງພຣະອະຣະຫັນໄດ້ແມ່ນບໍ?

ປຣ. ແມ່ນ

ສກ. ພວກອະມະນຸດຂ້າສັດ ຯລຯ ລັກຊັບ ຯລຯ ເວົ້າຕົວະ ຯລຯ ເວົ້າສັບສົ່ ຯລຯ ເວົ້າຄຳຫຍາບ ຯລຯ ເວົ້າໂລເລ ຯລຯ ຕັດປ່ອງຍ່ອງເບົາ ຯລຯ ປຸ້ນສະດົມ ຯລຯ ປຸ້ນເຮືອນຫຼັງດຽວ ຯລຯ ດັກປຸ້ນໃນທາງປ່ຽວ ຯລຯ ຜິດເມຍຂອງຜູ້ອື່ນ ຯລຯ ປຸ້ນຊາວບ້ານ ຯລຯ ປຸ້ນຊາວນິຄົມ ໂດຍເພດຂອງພຣະອະຣະຫັນໄດ້ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

**ອະຣະຫັນຕະວັນນະກະຖາ ຈົບ**

# ໓-໗. ອິດສະຣິຍະການະກາຣິກາກະຖາ (໔໔໐-໔໔໘)

## ວ່າດ້ວຍການເຮັດຕາມອຳນາດຄວາມປະສົງ

[໗໑໐] ສກ. ພຣະໂພທິສັດໄປສູ່ວິນິບາດ ຍ້ອນເຫດເຮັດຕາມອຳນາດຄວາມປະສົງແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂພທິສັດໄປສູ່ນະຣົກ ຯລຯ ສັນຊີວະນະຣົກ ຯລຯ ກາລະສຸດຕະນະຣົກ ຯລຯ ຕາປະນະນະຣົກ ຯລຯ ປະຕາປະນະນະຣົກ ຯລຯ ສັງຄາຕະນະຣົກ ຯລຯ ໂຣຣຸວະນະຣົກ ຯລຯ ອະເວຈີນະຣົກ ຍ້ອນເຫດເຮັດຕາມອຳນາດຄວາມປະສົງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະໂພທິສັດໄປສູ່ວິນິບາດ ຍ້ອນເຫດເຮັດຕາມອຳນາດຄວາມປະສົງແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ວ່າ "ພຣະໂພທິສັດໄປສູ່ວິນິບາດ ຍ້ອນເຫດເຮັດຕາມອຳນາດຄວາມປະສົງ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ບໍ່ມີ

ສກ. ຫາກພຣະສູດທີ່ວ່າ "ພຣະໂພທິສັດໄປສູ່ວິນິບາດ ຍ້ອນເຫດເຮັດຕາມອຳນາດຄວາມປະສົງ" ບໍ່ມີຢູ່ຈິງ ທ່ານກໍບໍ່ຄວນຍອມຮັບວ່າ "ພຣະໂພທິສັດໄປສູ່ວິນິບາດ ຍ້ອນເຫດເຮັດຕາມອຳນາດຄວາມປະສົງ"

[໗໑໑] ສກ. ພຣະໂພທິສັດຢັ່ງລົງສູ່ປະຕິສົນທິໃນທ້ອງ ຍ້ອນເຫດເຮັດຕາມອຳນາດຄວາມປະສົງແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂພທິສັດເຂົ້າເຖິງນະຣົກ ກຳເນີດສັດເດຍຣັດສານ ຍ້ອນເຫດເຮັດຕາມອຳນາດຄວາມປະສົງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະໂພທິສັດຢັ່ງລົງສູ່ປະຕິສົນທິໃນທ້ອງ ຍ້ອນເຫດເຮັດຕາມອຳນາດຄວາມປະສົງແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂພທິສັດເປັນຜູ້ມີລິດແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະໂພທິສັດເປັນຜູ້ມີລິດແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂພທິສັດໄດ້ຈະເລີນສັນທິດທິບາດ ຯລຯ ວິຣິຍິດທິບາດ ຯລຯ ຈິດຕິດທິບາດ ຯລຯ ວິມັງສິດທິບາດແລ້ວແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະໂພທິສັດຢັ່ງລົງສູ່ປະຕິສົນທິໃນທ້ອງ ຍ້ອນເຫດເຮັດຕາມອຳນາດຄວາມປະສົງແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ວ່າ "ພຣະໂພທິສັດຢັ່ງລົງສູ່ປະຕິສົນທິໃນທ້ອງ ຍ້ອນເຫດເຮັດຕາມອຳນາດຄວາມປະສົງ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ບໍ່ມີ

ສກ. ຫາກພຣະສູດທີ່ວ່າ "ພຣະໂພທິສັດຢັ່ງລົງສູ່ປະຕິສົນທິໃນທ້ອງ ຍ້ອນເຫດເຮັດຕາມອຳນາດຄວາມປະສົງ" ບໍ່ມີຢູ່ຈິງ ທ່ານກໍບໍ່ຄວນຍອມຮັບວ່າ "ພຣະໂພທິສັດຢັ່ງລົງສູ່ປະຕິສົນທິໃນທ້ອງ ຍ້ອນເຫດເຮັດຕາມອຳນາດຄວາມປະສົງ"

[໙໑໘] ສກ. ພຣະໂພທິສັດເຮັດທຸກກະຣະກິຣິຍາ ຍ້ອນເຫດເຮັດຕາມອຳນາດຄວາມປະສົງແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂພທິສັດກັບມາສູ່ຄວາມເຫັນວ່າໂລກທ່ຽງ ຯລຯ ໂລກບໍ່ທ່ຽງ ຯລຯ ໂລກມີບ່ອນສຸດ ຯລຯ ໂລກບໍ່ມີບ່ອນສຸດ ຯລຯ ຊີວະກັບສະຣີຣະເປັນແນວດຽວກັນ ຯລຯ ຊີວະກັບສະຣີຣະເປັນຄົນລະຢ່າງກັນ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ຯລຯ ຫຼັງຈາກຕາຍຕະຖາຄົດເກີດອີກແລະບໍ່ເກີດອີກ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ຍ້ອນເຫດເຮັດຕາມອຳນາດຄວາມປະສົງແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ພຣະໂພທິສັດເຮັດທຸກກະຣະກິຣິຍາ ຍ້ອນເຫດເຮັດຕາມອຳນາດຄວາມປະສົງແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ວ່າ "ພຣະໂພທິສັດເຮັດທຸກກະຣະກິຣິຍາ ຍ້ອນເຫດເຮັດຕາມອຳນາດຄວາມປະສົງ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ບໍ່ມີ

ສກ. ຫາກພຣະສູດທີ່ວ່າ "ພຣະໂພທິສັດເຮັດທຸກກະຣະກິຣິຍາ ຍ້ອນເຫດເຮັດຕາມອຳນາດຄວາມປະສົງ" ບໍ່ມີຢູ່ຈິງ ທ່ານກໍບໍ່ຄວນຍອມຮັບວ່າ "ພຣະໂພທິສັດເຮັດທຸກກະຣະກິຣິຍາ ຍ້ອນເຫດເຮັດຕາມອຳນາດຄວາມປະສົງ"

[໙໑໓] ສກ. ພຣະໂພທິສັດທຳຄວາມພຽນອື່ນອຸທິດສາດສະດາອື່ນ ຍ້ອນເຫດເຮັດຕາມອຳນາດຄວາມປະສົງແມ່ນບໍ?

ປຣ. ແມ່ນ

ສກ. ພຣະໂພທິສັດກັບມາສູ່ຄວາມເຫັນວ່າ "ໂລກທັ່ງ ໆ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ຍ້ອນເຫດເຮັດຕາມອຳນາດຄວາມປະສົງ" ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໙໑໔] ສກ. ພຣະໂພທິສັດອຸທິດສາດສະດາອື່ນ ຍ້ອນເຫດເຮັດຕາມອຳນາດຄວາມປະສົງແມ່ນບໍ?

ປຣ. ແມ່ນ

ສກ. ພຣະສູດທີ່ວ່າ "ພຣະໂພທິສັດອຸທິດສາດສະດາອື່ນ ຍ້ອນເຫດເຮັດຕາມອຳນາດຄວາມປະສົງ" ມີຢູ່ຈິງບໍ່ແມ່ນບໍ?

ປຣ. ບໍ່ມີ

ສກ. ຫາກພຣະສູດທີ່ວ່າ "ພຣະໂພທິສັດອຸທິດສາດສະດາອື່ນ ຍ້ອນເຫດເຮັດຕາມອຳນາດຄວາມປະສົງ" ບໍ່ມີຢູ່ຈິງ ທ່ານກໍບໍ່ຄວນຍອມຮັບວ່າ "ພຣະໂພທິສັດອຸທິດສາດສະດາອື່ນຍ້ອນເຫດເຮັດຕາມອຳນາດຄວາມປະສົງ"

**ອິດສະຣິຍະການະກາຣິກາກະຖາ ຈົບ**

## ໗. ປະຕິຣູປະກະຖາ (໘໘໕)

## ວ່າດ້ວຍສະພາວະທຳທີ່ທຽບກັນໄດ້

[໙໑໕] ສກ. ສະພາວະທຳທີ່ບໍ່ແມ່ນທາຄະ ແຕ່ທຽບໄດ້ກັບທາຄະມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ບໍ່ແມ່ນຜັດສະແຕ່ທຽບໄດ້ກັບຜັດສະ ບໍ່ແມ່ນເວທະນາແຕ່ທຽບໄດ້ກັບເວທະນາ ບໍ່ແມ່ນສັນຍາແຕ່ທຽບໄດ້ກັບສັນຍາ ບໍ່ແມ່ນເຈຕະນາແຕ່ທຽບໄດ້ກັບເຈຕະນາ ບໍ່ແມ່ນຈິດແຕ່ທຽບໄດ້ກັບຈິດ ບໍ່ແມ່ນສັດທາແຕ່ທຽບໄດ້ກັບສັດທາ ບໍ່ແມ່ນວິຣິຍະແຕ່ທຽບໄດ້ກັບວິຣິຍະບໍ່ແມ່ນສະຕິແຕ່ທຽບໄດ້ກັບສະຕິ ບໍ່ແມ່ນສະມາທິແຕ່ທຽບໄດ້ກັບສະມາທິ ບໍ່ແມ່ນປັນຍາແຕ່ທຽບໄດ້ກັບປັນຍາມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

[໙໑໖] ສກ. ສະພາວະທຳທີ່ບໍ່ແມ່ນໂທສະແຕ່ຫຼຸບໄດ້ກັບໂທສະ ບໍ່ແມ່ນໂມຫະແຕ່ຫຼຸບໄດ້ກັບໂມຫະ ບໍ່ແມ່ນກິເລດແຕ່ຫຼຸບໄດ້ກັບກິເລດມີຢູ່ແມ່ນບໍ?

ປຣ. ແມ່ນ

ສກ. ສະພາວະທຳທີ່ບໍ່ແມ່ນຜັດສະແຕ່ຫຼຸບໄດ້ກັບຜັດສະ ຯລຯ ບໍ່ແມ່ນປັນຍາແຕ່ຫຼຸບໄດ້ກັບປັນຍາມີຢູ່ແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

**ປະຕິຮູປະກະຖາ ຈົບ**

## ໙. ອະປະຣິນິບຜັນນະກະຖາ (໔໔໖)

## ວ່າດ້ວຍສະພາວະທຳທີ່ບໍ່ສຳເລັດ (ມາຈາກເຫດ)

[໙໑໗] ສກ. ຮູບເປັນສະພາວະທຳທີ່ບໍ່ສຳເລັດແມ່ນບໍ?

ປຣ. ແມ່ນ

ສກ. ຮູບບໍ່ແມ່ນບໍ່ທ່ຽງ ບໍ່ແມ່ນຖືກປັດໄຈປຸງແຕ່ງ ບໍ່ແມ່ນອີງອາໄສປັດໄຈເກີດຂຶ້ນ ບໍ່ແມ່ນມີຄວາມສິ້ນໄປ ບໍ່ແມ່ນມີຄວາມເສື່ອມໄປ ບໍ່ແມ່ນມີຄວາມຄາຍອອກ ບໍ່ແມ່ນມີຄວາມດັບໄປ ບໍ່ແມ່ນມີຄວາມແປຜັນໄປເປັນທຳມະດາແມ່ນບໍ?

ປຣ. ບໍ່ຄວນກ່າວແບບນັ້ນ ຯລຯ

ສກ. ຮູບບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສປັດໄຈເກີດຂຶ້ນ ມີຄວາມສິ້ນໄປ ເສື່ອມໄປ ຄາຍອອກ ດັບໄປ ແປຜັນໄປເປັນທຳມະດາບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກຮູບບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ຯລຯ ມີຄວາມແປຜັນໄປເປັນທຳມະດາ ທ່ານກໍບໍ່ຄວນຍອມຮັບວ່າ "ຮູບເປັນສະພາວະທຳທີ່ບໍ່ສຳເລັດ"

ສກ. ທຸກເທົ່ານັ້ນເປັນສະພາວະທຳທີ່ສຳເລັດແມ່ນບໍ?

ປຣ. ແມ່ນ

ສກ. ສິ່ງໃດບໍ່ທ່ຽງ ສິ່ງນັ້ນພຣະຜູ້ມີພຣະພາກເຈົ້າຕັດວ່າ "ເປັນທຸກ" ຮູບບໍ່ທ່ຽງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກສິ່ງໃດບໍ່ທ່ຽງ ສິ່ງນັ້ນພຣະຜູ້ມີພຣະພາກເຈົ້າຕັດວ່າ "ເປັນທຸກ" ຮູບບໍ່ທ່ຽງ ທ່ານກໍບໍ່ຄວນຍອມຮັບວ່າ "ທຸກເທົ່ານັ້ນເປັນສະພາວະທຳທີ່ສຳເລັດ"

[໗໑໙] ສກ. ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານ ຯລຯ ຈັກຂາຍະຕະນະ ຯລຯ ທຳມາຍະຕະນະ ຯລຯ ຈັກຂຸທາດ ຯລຯ ທຳມະທາດ ຯລຯ ຈັກຂຸນຊີ ຯລຯ ອັນຍາຕາວິນຊີ ເປັນສະພາວະທຳທີ່ບໍ່ສຳເລັດແມ່ນບໍ?

ປຣ. ແມ່ນ

ສກ. ອັນຍາຕາວິນຊີບໍ່ແມ່ນບໍ່ທ່ຽງ ຯລຯ ບໍ່ແມ່ນມີຄວາມແປຜັນໄປເປັນທຳມະດາແມ່ນບໍ?

ປຣ. ບໍ່ຄວນກ່າວແນວນັ້ນ ຯລຯ

ສກ. ອັນຍາຕາວິນຊີບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ຯລຯ ມີຄວາມແປຜັນໄປເປັນທຳມະດາບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກອັນຍາຕາວິນຊີບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສປັດໄຈເກີດຂຶ້ນ ມີຄວາມສິ້ນໄປ ເສື່ອມໄປ ຄາຍອອກ ດັບໄປ ແປຜັນໄປເປັນທຳມະດາ ທ່ານກໍບໍ່ຄວນຍອມຮັບວ່າ "ອັນຍາຕາວິນຊີເປັນສະພາວະທຳທີ່ບໍ່ສຳເລັດ"

ສກ. ທຸກເທົ່ານັ້ນເປັນສະພາວະທຳທີ່ສຳເລັດແມ່ນບໍ?

ປຣ. ແມ່ນ

ສກ. ສິ່ງໃດບໍ່ທ່ຽງ ສິ່ງນັ້ນພຣະຜູ້ມີພຣະພາກເຈົ້າຕັດວ່າ "ເປັນທຸກ" ອັນຍາຕາວິນຊີ ບໍ່ທ່ຽງບໍ່ແມ່ນບໍ?

ປຣ. ແມ່ນ

ສກ. ຫາກສິ່ງໃດບໍ່ທ່ຽງ ສິ່ງນັ້ນພຣະຜູ້ມີພຣະພາກເຈົ້າຕັດວ່າ "ເປັນທຸກ" ອັນຍາຕາວິນຊີບໍ່ທ່ຽງ ທ່ານກໍບໍ່ຄວນຍອມຮັບວ່າ "ທຸກເທົ່ານັ້ນເປັນສະພາວະທຳທີ່ສຳເລັດ"

**ອະປະຣິນິບຜັນນະກະຖາ ຈົບ**

**ເຕວີສະຕິມະວັກ ຈົບ**

## ລວມກະຖາທີ່ມີໃນວັກນີ້ ຄື

໑. ເອກາທິປະປາຍະກະຖາ
໒-໗. ອິດສະຣິຍະກາມະກາຣິກາກະຖາ
໗. ອະປະຣິນິບຜັນນະກະຖາ
໘. ອະຣະຫັນຕະວັນນະກະຖາ
໙. ປະຕິຣູປະກະຖາ

**ຂຸດທະກະອັດທະປັນນາດ ຈົບ**

## ລວມວັກທີ່ມີໃນຂຸດທະກະອັດທະປັນນາດນີ້ ຄື

ວັກທີ ໘໑ ເລີ່ມດ້ວຍສາທະນະກະຖາ
ວັກທີ ໘໒ ເລີ່ມດ້ວຍປະຣິນິບພານະກະຖາ
ວັກທີ ໘໓ ເລີ່ມດ້ວຍເອກາທິປະປາຍະກະຖາ

## ລວມປັນນາດທີ່ມີໃນກະຖາວັດຖຸປະກອນນີ້ ຄື

໑. ມະຫາປັນນາດ
໒. ນິຍາມປັນນາດ (ທຸຕິຍະປັນນາດ)
໓. ອະນຸສະຍະປັນນາດ (ຕະຕິຍະປັນນາດ)
໔. ນິກຄະຫະປັນນາດ (ຈະຕຸດຖະປັນນາດ)
໕. ຂຸດທະກະອັດທະປັນນາດ (ປັນນາດທີ່ເກີນເຄິ່ງໄປເລັກໜ້ອຍ)

ປັນນາດເຫຼົ່ານີ້ ໃນກະຖາວັດຖຸປະກອນຕັ້ງຢູ່ໃນພຣະສູດເດີມເປັນຫຼັກ ອົບຣົມນິກາຍອື່ນຮຸ່ງເຮືອງໃນສາດສະໜາຂອງພຣະພຸດທະເຈົ້າ

**ກະຖາວັດຖຸປະກອນມີ ໓໕ ພານະວານ ຈົບ**